# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔໗

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໙

## ຂຸດທະກະນິກາຍ ຊາດົກ ພາກ ໑



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປີດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປີດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປີດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປີດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປີດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປີດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

## ໒. ທຸກະນິບາດ

# ພຣະໄຕຣປີດົກ

## ເຫຼັ້ມທີ ໒໗

# ພຣະສູດຕັນຕະປີດົກ

## ເຫຼັ້ມທີ ໑໙

## ຂຸດທະກະນິກາຍ ຊາດົກ ພາກ ໑

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ໑. ເອກກະນິບາດ

# ໑. ອະປັນນະກະວັກ

## ໝວດວ່າດ້ວຍການປະຕິບັດບໍ່ຜິດ

## ໑. ອະປັນນະກະຊາດົກ (໑)

## ວ່າດ້ວຍການປະຕິບັດບໍ່ຜິດ

(ພຣະສຳມາສຳພຸດທະເຈົ້າ ຊົງພາຣົບພໍ່ຄ້າກວຽນສອງຄົນ ຄົນໜຶ່ງປະຕິບັດຜິດ ຄົນ ໜຶ່ງປະຕິ-
ບັດຖືກ ຕັດພຣະຄາຖາວ່າ)

[໑] ຄົນສະຫຼາດພວກໜຶ່ງກ່າວຖານະທີ່ບໍ່ຜິດ
ນັກຄາດຄະເນທັງຫຼາຍກ່າວຖານະທີ ໒ (ທີ່ຜິດ)
ຜູ້ມີປັນຍາຮູ້ຈັກຖານະທີ່ບໍ່ຜິດແລະຖານະທີ່ຜິດນັ້ນແລ້ວ
ຄວນຖືຖານະທີ່ບໍ່ຜິດເອົາໄວ້

**ອະປັນນະກະຊາດົກທີ ໑ ຈົບ**

# ໔. ວັນນຸປະຖະຊາດົກ (໒)
## ວ່າດ້ວຍການພ່ຳເພັງຄວາມພຽນເໝືອນຂຸດຫານ້ຳກາງທະເລຊາຍ

(ພຣະສຳມາສຳພຸດທະເຈົ້າຊົງຜາຣົບພໍ່ຄ້າເດີນທາງກາງທະເລຊາຍຂຸດຫານ້ຳໄດ້ດ້ວຍຄວາມພຽນ ປຽບທຽບກັບມຸນີຜູ້ທຳຄວາມພຽນຍ່ອມໄດ້ຄວາມສະງົບໃຈ ຕັດພຣະຄາຖາວ່າ)

[໒] ຊົນທັງຫຼາຍຜູ້ບໍ່ຂີ້ຄ້ານ
ຂຸດພາກພື້ນທີ່ຫົນທາງກາງທະເລຊາຍ
ໄດ້ພົບນ້ຳທີ່ກາງທະເລຊາຍອັນຮາບພຽງ ສັນໃດ
ມຸນີຜູ້ປະກອບດ້ວຍຄວາມພຽນແລະກຳລັງ ບໍ່ຂີ້ຄ້ານ
ເພິ່ງປະສົບຄວາມສະງົບໃຈ ສັນນັ້ນ

**ວັນນຸປະຖະຊາດົກທີ ໒ ຈົບ**

# ໓. ເສຣິວະວານິດຊາດົກ (໓)
## ວ່າດ້ວຍພໍ່ຄ້າຊື່ເສຣິວະ

(ພຣະສຳມາສຳພຸດທະເຈົ້າຊົງຜາຣົບພິກຂຸຜູ້ລະຄວາມພຽນ ຕັດພຣະຄາຖາວ່າ)

[໓] ຖ້າທ່ານພາດຈາກສະພາວະອັນແນ່ນອນແຫ່ງພຣະສັດທຳ
ໃນສາດສະໜານີ້ແລ້ວ ທ່ານຈະຕ້ອງເດືອດຮ້ອນຕະຫຼອດການລະນານ
ເໝືອນພໍ່ຄ້າຊື່ວ່າເສຣິວະນີ້

**ເສຣິວະວານິດຊາດົກທີ ໓ ຈົບ**

# ໔. ຈູລະເສດຖີຊາດົກ (໔)
## ວ່າດ້ວຍຈູລະເສດຖີ

(ພຣະສຳມາສຳພຸດທະເຈົ້າຊົງຜາຣົບການຕັ້ງຕົວໄດ້ດ້ວຍຊັບພຽງເລັກໜ້ອຍ ຕັດພຣະຄາຖາວ່າ)

[໔] ຜູ້ມີປັນຍາພິຈາລະນາເຫັນໂດຍປະຈັກ
ຍ່ອມຕັ້ງຕົວໄດ້ດ້ວຍສິ່ງຂອງອັນມີມູນຄ່າໜ້ອຍ
ເໝືອນຄົນກໍ່ໄຟກອງນ້ອຍ ໆ ເຮັດໃຫ້ເປັນກອງໃຫຍ່ໄດ້

**ຈູລະເສດຖີຊາດົກທີ ໔ ຈົບ**

## ໕. ຕັນທຸລະນາລິຊາດົກ (໕)
## ວ່າດ້ວຍມູນຄ່າເຂົ້າສານທະນານໜຶ່ງ

(ອຳມາດທູນຖາມພຣະຣາຊາວ່າ)

[໕] ຂ້າແດ່ ພຣະມະຫາຣາດຊະເຈົ້າ ພຣະອົງຕັດວ່າ ເຂົ້າສານ ໑ ທະນານ
ມີຣາຄາເທົ່າມູນຄ່າມ້າ ໕໐໐ ໂຕບໍ?
ແລະເຂົ້າສານ ໑ ທະນານນີ້ມີຄ່າເທົ່າກັບເມືອງພາຣານະສີ
ທັງພາຍໃນພາຍນອກເລີຍບໍ?

**ຕັນທຸລະນາລິຊາດົກທີ ໕ ຈົບ**

## ໖. ເທວະທຳມະຊາດົກ (໖)
## ວ່າດ້ວຍທຳຂອງເທວະດາ

(ພຣະໂພທິສັດກ່າວວ່າ)

[໖] ບຸກຄົນຜູ້ເຖິງພ້ອມດ້ວຍຫິຣິແລະໂອດຕັບປະ
ຕັ້ງໝັ້ນຢູ່ໃນສຸກກະທຳ (ກຸສົນທຳ)
ເປັນຜູ້ສະງົບຣະງັບ ເປັນຄົນດີງາມ
ທ່ານຮຽກວ່າ ຜູ້ມີເທວະທຳໃນໂລກ

**ເທວະທຳມະຊາດົກທີ ໖ ຈົບ**

## ໗. ກັດຖະຫາຣິຊາດົກ (໗)
## ວ່າດ້ວຍຍິງຫາຟືນ

(ພຣະໂພທິສັດກ່າວທຳແກ່ພຣະຣາດຊະບິດາວ່າ)

[໗] ຂ້າແດ່ພຣະມະຫາຣາດຊະເຈົ້າ ຂ້ານ້ອຍເປັນໂອຣົດຂອງພຣະອົງ
ຂ້າແດ່ ພຣະອົງຜູ້ເປັນອະທິບໍດີຂອງໝູ່ຊົນ
ຂໍພຣະອົງຊົງລ້ຽງຂ້ານ້ອຍ
ແມ່ນຄົນເຫຼົ່າອື່ນພຣະອົງຍັງຊົງລ້ຽງໄດ້
ເປັນຫຍັງຈະບໍ່ຊົງລ້ຽງໂອຣົດຂອງພຣະອົງໄດ້ນໍ?

**ກັດຖະຫາຣິຊາດົກທີ ໗ ຈົບ**

## ໗. ຄາມະນິຊາດົກ (໗)
## ວ່າດ້ວຍຄາມະນິກຸມານ

(ຄາມະນິກຸມານເປ່ງອຸທານວ່າ)

[໗] ເອີກໍ ຜົນທີ່ຫວັງຈະສຳເລັດແກ່ຜູ້ບໍ່ໃຈຮ້ອນຟ້າວໄດ້
ເຮົາມີພົມມະຈັນແກ່ກ້າແລ້ວ
ທ່ານຈົ່ງເຂົ້າໃຈດັ່ງນີ້ເທີ້ນ ພໍ່ຄາມະນິ

**ຄາມະນິຊາດົກທີ ໗ ຈົບ**

## ໘. ມະຄະເທວະຊາດົກ (໘)
## ວ່າດ້ວຍພຣະເຈົ້າມະຄະເທວະ

(ພຣະຣາຊາຊົງຈັບພຣະເກສາຫງອກແລ້ວ ຕັດແກ່ອຳມາດທັງຫຼາຍວ່າ)

[໘] ເມື່ອໄວລ່ວງເລີຍໄປ ຜົມເທິງຫົວຂອງເຮົາຫງອກແລ້ວ
ເທວະທູດກໍຜາກົດແຈ້ງ ບັດນີ້ເປັນເວລາທີ່ເຮົາຄວນຈະບວດແລ້ວ

**ມະຄະເທວະຊາດົກທີ ໘ ຈົບ**

## ໑໐. ສຸຂະວິຫາຣີຊາດົກ (໑໐)
## ວ່າດ້ວຍການຢູ່ເປັນສຸກ

(ລືສີໂພທິສັດສະແດງທຳຖວາຍພຣະຣາຊາວ່າ)

[໑໐] ບຸກຄົນເຫຼົ່າອື່ນບໍ່ຕ້ອງຮັກສາຄຸ້ມຄອງຜູ້ໃດ
ແລະຜູ້ໃດກໍບໍ່ຕ້ອງຮັກສາຄຸ້ມຄອງບຸກຄົນເຫຼົ່າອື່ນ
ມະຫາບໍພິດ ຜູ້ນັ້ນເປັນຜູ້ບໍ່ເຍື່ອໃຍໃນການທັງຫຼາຍ
ຍ່ອມຢູ່ເປັນສຸກ

**ສຸຂະວິຫາຣີຊາດົກທີ ໑໐ ຈົບ**

**ອະປັນນະກະວັກທີ ໑ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື



# ໒. ສີລະວັກ

## ໝວດວ່າດ້ວຍສີນ

## ໑. ລັກຂະນະຊາດົກ (໑໑)

## ວ່າດ້ວຍເນື້ອຊື່ລັກຂະນະ

(ພະຍາເນື້ອໂພທິສັດເຫັນລູກທັງ ໒ ກຳລັງມາ ຈຶ່ງກ່າວກັບໝູ່ຍາດວ່າ)

[໑໑] ປະໂຫຍດຍ່ອມມີແກ່ຜູ້ມີສີນ ຜູ້ທຳການຕ້ອນຮັບເປັນປົກກະຕິ
ທ່ານຈົ່ງເບິ່ງລູກເນື້ອຊື່ລັກຂະທີ່ໝູ່ຍາດແວດລ້ອມກັບມາ
ແລະຈົ່ງເບິ່ງລູກເນື້ອຊື່ກາລະນີ້ທີ່ເສື່ອມຈາກໝູ່ຍາດ

**ລັກຂະນະຊາດົກທີ ໑ ຈົບ**

## ໒. ນິໂຄທະມິຄະຊາດົກ (໑໒)

## ວ່າດ້ວຍພະຍາເນື້ອຊື່ນິໂຄທະ

(ແມ່ເນື້ອເຫັນລູກກຳລັງຈະໄປສູ່ທີ່ຢູ່ຂອງເນື້ອສາຂະ ຈຶ່ງກ່າວສອນວ່າ)

[໑໒] ລູກຫຼືຜູ້ອື່ນຄວນຄົບຫາເນື້ອຊື່ນິໂຄທະທ່ານັ້ນ
ບໍ່ຄວນເຂົ້າໄປຄົບຫາເນື້ອຊື່ສາຂະ
ການຕາຍໃນສຳນັກຂອງເນື້ອຊື່ນິໂຄທະຍັງປະເສີດກວ່າ
ການມີຊີວິດໃນສຳນັກຂອງເນື້ອຊື່ສາຂະຈະປະເສີດອັນໃດໄດ້

**ນິໂຄທະມິຄະຊາດົກທີ ໒ ຈົບ**

## ໓. ກັນທິຊາດົກ (໑໓)
## ວ່າດ້ວຍເລື້ອງທີ່ໜ້າຕຳໜິຄົນມີລູກສອນເປັນອາວຸດເປັນຕົ້ນ

(ເທວະດາໂພທິສັດຕຳໜິເລື້ອງທີ່ຄວນຕຳໜິ ໓ ຢ່າງ ຈຶ່ງກ່າວວ່າ)

[໑໓] ໜ້າຕຳໜິ ຄົນທີ່ມີລູກສອນເປັນອາວຸດ ຍິງໄປເຕັມກຳລັງ
ໜ້າຕຳໜິ ຊົນນະບົດທີ່ມີສະຕີເປັນຜູ້ນຳ
ອັນໜຶ່ງ ແມ່ນຊາຍຜູ້ຕົກຢູ່ໃນອຳນາດຂອງຍິງ ກໍໜ້າຕຳໜິ

**ກັນທິຊາດົກທີ ໓ ຈົບ**

## ໔. ວາຕະມິຄະຊາດົກ (໑໔)
## ວ່າດ້ວຍເນື້ອສະມັນ

(ພຣະຣາຊາຊົງດຳຣິວ່າ ສະພາວະທີ່ຊົ່ວກວ່າຄວາມຢາກໃນຣົດບໍ່ມີ ຈຶ່ງຕັດວ່າ)

[໑໔] ໄດ້ຍິນວ່າ ສະພາວະຢ່າງອື່ນທີ່ຈະຊົ່ວຍິ່ງກວ່າຣົດທັງຫຼາຍບໍ່ມີ
ຣົດເປັນສະພາວະທີ່ຊົ່ວກວ່າບ່ອນຢູ່ອາໄສ ກວ່າຄວາມສະໜິດສະໜົມ
ຄົນເຝົ້າສວນຊື່ສັນໄຊນຳເນື້ອສະມັນທີ່ອາໄສຢູ່ໃນປ່າທຶບ
ມາສູ່ອຳນາດໄດ້ກໍເພາະຣົດ

**ວາຕະມິຄະຊາດົກທີ ໔ ຈົບ**

## ໕. ຂະຣາທິຍະຊາດົກ (໑໕)
## ວ່າດ້ວຍລູກຂອງແມ່ເນື້ອທີ່ຊື່ຂະຣາທິຍາ

(ພະຍາເນື້ອໂພທິສັດບໍ່ປາຖະໜາຈະສອນລູກຂອງນ້ອງສາວ ຈຶ່ງກ່າວວ່າ)

[໑໕] ແມ່ຂະຣາທິຍາ ເຮົາບໍ່ສາມາດຈະສັ່ງສອນເນື້ອ
ທີ່ມີກີບຕີນ ໘ ກີບ ມີເຂົາຄົດຕັ້ງແຕ່ກົກຮອດປາຍ
ທີ່ລະເລີຍໂອວາດຕະຫຼອດ ໗ ວັນຕົວນັ້ນໄດ້

**ຂະຣາທິຍະຊາດົກທີ ໕ ຈົບ**

## ໖. ຕິປັນລັດຖະມິຄະຊາດົກ (໑໖)
## ວ່າດ້ວຍເນື້ອລວງນາຍພານດ້ວຍການນອນ ๓ ທ່າ

(ພະຍາເນື້ອໂພທິສັດກ່າວແກ່ນ້ອງສາວວ່າ)

[໑໖] ນາງ ອ້າຍໃຫ້ເນື້ອ (ຫຼານຊາຍ) ທີ່ມີກີບຕີນ ໘ ກີບ
ຮຽນທ່ານອນ ๓ ທ່າ ຮຽນເລ່ກົນມາຍາຫຼາຍຢ່າງ
ແລະການດື່ມນໍ້າໃນເວລາທ່ຽງຄືນ
ເນື້ອນັ້ນ ເມື່ອຫັນໃຈທາງດັງຂ້າງທີ່ແນບຕິດຢູ່ກັບພື້ນດິນ
ກໍຈະລວງນາຍພານໄດ້ດ້ວຍອຸບາຍ ໖ ປະການ

**ຕິປັນລັດຖະມິຄະຊາດົກທີ ໖ ຈົບ**

## ໗. ມາລຸຕະຊາດົກ (໑໗)
## ວ່າດ້ວຍຄວາມໜາວເກີດແຕ່ລົມ

(ລືສີໂພທິສັດຖືກເສືອແລະຮາດຊະສີຖາມ ຈຶ່ງກ່າວວ່າ)

[໑໗] ສະໄໝໃດລົມພັດມາ ສະໄໝນັ້ນຈະເປັນຂ້າງແຮມກໍຕາມ
ຂ້າງຂຶ້ນກໍຕາມ ຍ່ອມມີຄວາມໜາວອັນເກີດແຕ່ລົມ
ໃນບັນຫາຂໍ້ນີ້ ທ່ານທັງ ໒ ຈຶ່ງບໍ່ມີໃຜເປັນຜູ້ພ່າຍແພ້

**ມາລຸຕະຊາດົກທີ ໗ ຈົບ**

## ໘. ມະຕະກະພັດຕະຊາດົກ (໑໘)
## ວ່າດ້ວຍການຂ້າສັດທຳບຸນອຸທິດໃຫ້ຜູ້ຕາຍ

(ຣຸກຂະເທວະດາໂພທິສັດສະແດງທຳແກ່ມະຫາຊົນວ່າ)

[໑໘] ຖ້າເຫຼົ່າສັດເພິ່ງຮູ້ຢ່າງນີ້ວ່າ
ການເກີດແລະສົມພົບນີ້ເປັນທຸກ
ສັດບໍ່ຄວນຂ້າສັດ ເພາະຜູ້ຂ້າສັດຍ່ອມເສົ້າໂສກ

**ມະຕະກະພັດຕະຊາດົກທີ ໘ ຈົບ**

## ໙. ອາຍາຈິດະພັດຕະຊາດົກ (໑໙)
## ວ່າດ້ວຍການຂ້າສັດບູຊາ

(ຣຸກຂະເທວະດາຢູ່ທີ່ຄ່າຄົບຕົ້ນໄມ້ກ່າວກັບກຸດຸມພີຜູ້ຂ້າສັດແກ້ບະວ່າ)

[໑໙] ຖ້າທ່ານຕ້ອງການຈະປົດຕົນໃຫ້ຫຼຸດພົ້ນ
ຈົ່ງປົດຕົນໃຫ້ຫຼຸດພົ້ນໂດຍວິທີທີ່ຈະບໍ່ຕິດແໜ້ນເທີ້ນ
ເມື່ອທ່ານປົດຕົນແບວນີ້ ຊື່ວ່າຍັງຕິດແໜ້ນຢູ່
ເພາະນັກປາດບໍ່ປົດຕົນໃຫ້ຫຼຸດພົ້ນດ້ວຍວິທີແບວນີ້
ການປົດຕົນໃຫ້ຫຼຸດພົ້ນແບວນີ້ ກັບເປັນການຜູກມັດຄົນພານ

**ອາຍາຈິດະພັດຕະຊາດົກທີ ໙ ຈົບ**

## ໑໐. ນະລະປານະຊາດົກ (໒໐)
## ວ່າດ້ວຍອຸບາຍດື່ມນ້ຳດ້ວຍໄມ້ອໍ້

(ພຣະສາດສະດາ ຊົງຮູ້ຄວາມທີ່ພຣະໂພທິສັດກັບຣາກສົດໂຕ້ຕອບກັນ ຈຶ່ງໄດ້ຕັດພຣະຄາຖາ
ນີ້ວ່າ)

[໒໐] ພະຍາວານອນບໍ່ເຫັນຮອຍຕີນທີ່ຂຶ້ນມາ
ເຫັນແຕ່ຮອຍຕີນທີ່ລົງໄປ ຈຶ່ງກ່າວວ່າ
ພວກເຮົາຈັກດື່ມນ້ຳດ້ວຍຫຼອດໄມ້ອໍ້
ທ່ານຈັກຂ້າເຮົາບໍ່ໄດ້

**ນະລະປານະຊາດົກທີ ໑໐ ຈົບ**

**ສີລະວັກທີ ໒ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

# ៩. ກຸຣຸງຄະວັກ

## ໝວດວ່າດ້ວຍກວາງ

## ໑. ກຸຣຸງຄະມິຄະຊາດົກ (໘໑)

### ວ່າດ້ວຍກວາງ

(ກວາງໂພທິສັດແກ້ງກ່າວກັບຕົ້ນໄມ້ກະທິບນາຍພານວ່າ)

[໘໑] ນີ້ໄມ້ມະຮື່ນ ການທີ່ທ່ານປ່ອຍໝາກມະຮື່ນໃຫ້ຫຼົ່ນກິ້ງມານັ້ນ
ກວາງຮູ້ແລ້ວ ເຮົາຈະໄປສູ່ໄມ້ມະຮື່ນຕົ້ນອື່ນ
ເຮົາບໍ່ພໍໃຈໝາກຂອງທ່ານ

**ກຸຣຸງຄະມິຄະຊາດົກທີ ໑ ຈົບ**

## ໒. ກຸກກຸຣະຊາດົກ (໘໒)

### ວ່າດ້ວຍໝາທີ່ຖືກຂ້າ

(ໝາໂພທິສັດສະແດງທຳຖວາຍພຣະຣາຊາຜູ້ເຮັດສິ່ງທີ່ບໍ່ເປັນທຳວ່າ)

[໘໒] ພວກລູກໝາທີ່ເຂົ້າລ້ຽງຈົນຈະເລີນເຕີບໂຕແລ້ວໃນຣາດຊະຕະກູນ
ເປັນສັດມີຕະກູນ ສົມບູນດ້ວຍສີສັນແລະກຳລັງ ກັບບໍ່ຖືກຂ້າ
ແຕ່ພວກເຮົາກັບຖືກຂ້າ ນີ້ຊື່ວ່າການຂ້າທີ່ແປກ
ຊື່ວ່າເປັນການຂ້າຜູ້ທີ່ມີກຳລັງອ່ອນແອ

**ກຸກກຸຣະຊາດົກທີ ໒ ຈົບ**

## ໓. ໂພຊາຊານີຍະຊາດົກ (໘໓)

### ວ່າດ້ວຍມ້າສິນທົບຊາດອາຊາໄນ

(ມ້າສິນທົບຊາດອາຊາໄນໂພທິສັດ ກ່າວກັບໝູ່ຍາດວ່າ)

[໘໓] ມ້າສິນທົບຊາດອາຊາໄນທີ່ຖືກຍິງດ້ວຍລູກສອນ
ແມ່ນວ່ານອນຕະແຄງຢູ່ ກໍຍັງປະເສີດກວ່າມ້າກະຈອກ
ທ່ານສາຣະຖີ ທ່ານຈົ່ງກະກຽມໃຫ້ເຮົາອອກຮົບອີກເທີ້ນ

**ໂພຊາຊານີຍະຊາດົກທີ ໓ ຈົບ**

## ໔. ອາຊັນຍະຊາດົກ (໘໔)
## ວ່າດ້ວຍມ້າອາຊາໄນກັບມ້າກະຈອກ

(ມ້າອາຊາໄນໂພທິສັດຖືກຟັນແລ້ວໝອບຢູ່ ກ່າວກັບພົນລົດວ່າ)

[໘໔] ບໍ່ວ່າໃນການໃດ ສະຖານທີ່ໃດ ຂະນະໃດ
ສະນາມຣົບໃດ ຫຼືເວລາໃດ
ມ້າອາຊາໄນກໍຢູ່ຂ້າງໜ້າ
ສ່ວນມ້າກະຈອກຢູ່ຂ້າງຫຼັງ

**ອາຊັນຍະຊາດົກທີ ໔ ຈົບ**

## ໕. ຕິດຖະຊາດົກ (໘໕)
## ວ່າດ້ວຍການລ້າງກຽດທ່ານ້ຳ

(ອຳມາດໂພທິສັດກ່າວກັບຄົນລ້ຽງມ້າວ່າ)

[໘໕] ນາຍສາຣະຖີ ທ່ານຈົ່ງໃຫ້ມ້າດື່ມນ້ຳທີ່ທ່າອື່ນແດ່
ແມ່ນເຂົ້າປາຍາສຊະນິດເກົ່າທີ່ຮັບປະທານຢູ່ເລື້ອຍ ໆ ຄົນກໍຍັງເບື່ອໄດ້

**ຕິດຖະຊາດົກທີ ໕ ຈົບ**

## ໖. ມະຫິລາມຸຂະຊາດົກ (໘໖)
## ວ່າດ້ວຍພະຍາຊ້າງມະຫິລາມຸຂະ

(ອຳມາດໂພທິສັດຂາບທູນພຣະຣາຊາວ່າ)

[໘໖] ພະຍາຊ້າງຕົ້ນຊື່ມະຫິລາມຸຂະໄດ້ທ່ຽວທຳຮ້າຍຄົນ
ເພາະຕັ້ງໃຈຮູ້ຄຳຂອງພວກໂຈນມາກ່ອນ
ພະຍາມຸງຄຸນທັດຖີໄດ້ຕັ້ງຢູ່ໃນຄຸນນະທຳທັງປວງ
ເພາະຕັ້ງໃຈຮູ້ຄຳຂອງນັກບວດຜູ້ສັງລວມດີ

**ມະຫິລາມຸຂະຊາດົກທີ ໖ ຈົບ**

## ໗. ອະພິນຫະຊາດົກ (໘໗)
## ວ່າດ້ວຍການໄດ້ເຫັນກັນເນືອງ ໆ

(ອຳມາດໂພທິສັດຂາບທູນພຣະຣາຊາວ່າ)

[໘໗] ພະຍາຊ້າງຕົ້ນ ທີ່ບໍ່ສາມາດຈະຮັບຄຳເຂົ້າ ບໍ່ສາມາດຈະຮັບກ້ອນເຂົ້າ
ບໍ່ສາມາດຈະຮັບຫຍ້າ ແລະບໍ່ສາມາດຈະຂັດສີຮ່າງກາຍໄດ້
ຂ້າພຣະອົງສຳຄັນວ່າພະຍາຊ້າງຕົວປະເສີດນັ້ນ
ມີຄວາມເຍື່ອໃຍໃນລູກໝາ ເພາະໄດ້ເຫັນກັນເນືອງ ໆ ໂດຍຂ້ານ້ອຍ

**ອະພິນຫະຊາດົກທີ ໗ ຈົບ**

## ໘. ນັນທິວິສາລະຊາດົກ (໘໘)
## ວ່າດ້ວຍງົວນັນທິວິສານ

(ພຣະສາດສະດາຊົງຕິຕຽນພວກພິກຂຸສັບພັກຄີຜູ້ເວົ້າຄຳຫຍາບຄາຍ ຕັດນັນທິວິສາລະຊາດົກນີ້
ແລ້ວ ຈຶ່ງຕັດພຣະຄາຖານີ້ວ່າ)

[໘໘] ບຸກຄົນຄວນເວົ້າແຕ່ຄຳທີ່ໜ້າພໍໃຈທໍ່ນັ້ນ
ບໍ່ຄວນເວົ້າຄຳທີ່ບໍ່ໜ້າພໍໃຈບໍ່ວ່າໃນເວລາໃດ
ເມື່ອພາມເວົ້າຄຳທີ່ໜ້າພໍໃຈ
ງົວນັນທິວິສານຈຶ່ງລາກສຳພາລະອັນໜັກໄປໄດ້
ທັງຍັງເຮັດໃຫ້ພາມໄດ້ຊັບອີກດ້ວຍ
ສ່ວນຕົນເອງກໍພໍໃຈ ຍ້ອນການຊ່ອຍເຫຼືອນັ້ນ

**ນັນທິວິສາລະຊາດົກທີ ໘ ຈົບ**

## ໙. ກັນຫະຊາດົກ (໘໙)
## ວ່າດ້ວຍງົວກັນຫະ

(ພຣະສາດສະດາ ຊົງສະແດງພຣະທຳມະເທດສະໜາວ່າ ພຣະຕະຖາຄົດຫາຜູ້ສະເໝີເໝືອນບໍ່
ໄດ້ທັງໃນອະດີດທັງໃນປັດຈຸບັນ ຈຶ່ງຕັດພຣະຄາຖານີ້ວ່າ)

[໘໙] ໃນບ່ອນໃດ ໆ ມີວຽກໜັກ ໃນບ່ອນໃດທົນທາງເປັນຮ່ອງເລິກ ສູງໂນນ

ໃນເວລານັ້ນ ຊົນທັງຫຼາຍຈະໃຊ້ງົວກັນທະ
ເພາະງົວກັນທະສາມາດຊອຍໄດ້

**ກັນທະຊາດົກທີ ໗ ຈົບ**

## ໑໐. ມຸນິກະຊາດົກ (໓໐)
## ວ່າດ້ວຍໝູຊື່ມຸນິກະ

(ງົວໂພທິສັດເວົ້າກັບນ້ອງເຊິ່ງມີຄວາມນ້ອຍໃຈວ່າ ເຂົາລ້ຽງດ້ວຍຫຍ້າແລະເຟືອງ ລ້ຽງໝູດ້ວຍເຂົ້າຕົ້ມແລະເຂົ້າງາມ ຈຶ່ງກ່າວຄາຖານີ້ວ່າ)

[໓໐] ເຈົ້າຢ່າປາຖະໜາເປັນຄືໝູມຸນິກະເລີຍ
ໝູມຸນິກະກິນອາຫານອັນເປັນເຫດໃຫ້ເດືອດຮ້ອນ
ເຈົ້າຈົ່ງເປັນຜູ້ຂວັນຂວາຍໜ້ອຍ ກິນເຂົ້າລີບເຫົ້ນ
ການກິນເຂົ້າລີບນີ້ເປັນເຫດໃຫ້ມີອາຍຸຍືນ

**ມຸນິກະຊາດົກທີ ໑໐ ຈົບ**

**ກຸຣຸງຄະວັກທີ ໓ ຈົບ**

## ລວມຊາດົກທີ່ມີໃນວັກນີ້ຄື

# ៤. ກຸລາວະກະວັກ

## ໝວດວ່າດ້ວຍລູກນົກຄຸດ

## ໑. ກຸລາວະກະຊາດົກ (໓໑)

## ວ່າດ້ວຍລູກນົກຄຸດ

(ທ້າວສັກກະໂພທິສັດຍອມສະລະຊີວິດໃຫ້ພວກອະສູນ ຕັດສັ່ງໃຫ້ມາຕະລີເທບສາຣະຖີຫັນຂັບ ລົດຟ້າວກັບເພາະຍ້ານລູກນົກຈະຕາຍວ່າ)

[໓໑] ມາຕະລີເທບພະບຸດ ທີ່ຕົ້ນງີ້ວມີລູກນົກຄຸດຢູ່
ທ່ານຈົ່ງຫັນຫົວລົດກັບ ເຮົາປະສົງຈະສະລະຊີວິດໃຫ້ພວກອະສູນ
ລູກນົກພວກນີ້ຢ່າໄດ້ຕາຍເລີຍ

**ກຸລາວະກະຊາດົກທີ ໑ ຈົບ**

## ៤. ນັດຈະຊາດົກ (໓៤)

## ວ່າດ້ວຍນົກຍູງຣຳແພນ

(ພະຍາຫົງຄຳບໍ່ຍອມຍົກລູກສາວໃຫ້ນົກຍູງທີ່ຂາດຫິຣິແລະໂອດຕັບປະ ຈຶ່ງກ່າວຄາຖານີ້ໃນທ່າມ-ກາງຝູງນົກວ່າ)

[໓៤] ສຽງຂອງທ່ານຊ່າງມ່ວນຈັບໃຈ ແຜ່ນຫຼັງກໍສວຍງາມ
ສ້ອຍຄໍກໍປຽບຄືດັ່ງສີແກ້ວໄພທູນແລະກຳຫາງກໍຍາວເປັນວາ
ເຮົາຈະບໍ່ໃຫ້ລູກສາວແກ່ທ່ານ ຍ້ອນການຣຳແພນຫາງລ່າຍລຳດອກ

**ນັດຈະຊາດົກທີ ៤ ຈົບ**

## ໓. ສຳໂມທະມານະຊາດົກ (໓໓)

## ວ່າດ້ວຍຄວາມມ່ວນຊື່ນບັນເທີງໃຈ

(ນາຍພານນົກຈັບນົກກະຈາບບໍ່ໄດ້ຖືກພັນລະຍາຕໍ່ວ່າ ຈຶ່ງກ່າວວ່າ)

[໓໓] ນົກກະຈາບທັງຫຼາຍມ່ວນຊື່ນບັນເທີງໃຈ
ຊ່ອຍກັນບິນພາເອົາຕາໜ່າງໄປໄດ້

ເມື່ອໃດພວກມັນຜິດຖຽງກັນ
ເມື່ອນັ້ນພວກມັນຈັກມາສູ່ເງື້ອມມືຂອງເຮົາ

**ສຳໂມທະມານະຊາດົກທີ ໓ ຈົບ**

## ໔. ມັດສະຊາດົກ (໓໔)
## ວ່າດ້ວຍພະຍາປາ

(ພະຍາປາຕິດມອງຢ້ານພັນລະຍາຈະເຂົ້າໃຈຜິດແລະບຽດບຽນເອົາຈຶ່ງຄ່ຳຄວນຢູ່ ຈຶ່ງ ກ່າວວ່າ)

[໓໔] ຄວາມເຢັນ ຄວາມຮ້ອນ ແລະການຕິດຢູ່ທີ່ມອງ
ບໍ່ໄດ້ບຽດບຽນໃຫ້ເຮົາໄດ້ຮັບທຸກ
ເໝືອນເລື້ອງທີ່ນາງປາເຂົ້າໃຈເຮົາວ່າ ໄປຍິນດີນາງປາຕົວອື່ນເລີຍ

**ມັດສະຊາດົກທີ ໔ ຈົບ**

## ໕. ວັດຕະກະຊາດົກ (໓໕)
## ວ່າດ້ວຍນົກຄຸ່ມໂພທິສັດ

(ນົກຄຸ່ມໂພທິສັດເມື່ອຈະຫ້າມໄຟປ່າ ຣະເລີກເຖິງພຣະຄຸນຂອງພຣະພຸດທະເຈົ້າໃນອະດີດ ຜາຣົບ ສັດຈະທີ່ມີຢູ່ໃນຕົນ ເມື່ອຈະເຮັດສັດຈະກິຣິຍາ ຈຶ່ງກ່າວວ່າ)

[໓໕] ປີກຂອງເຮົາມີຢູ່ແຕ່ຍັງບິນບໍ່ໄດ້
ຕີນທັງ ໒ ຂ້າງຂອງເຮົາມີຢູ່ແຕ່ກໍຍັງຍ່າງບໍ່ໄດ້
ແລະມານດາບິດາຂອງເຮົາກໍໜີໄພໄປແລ້ວ
ໄຟປ່າເອີຍ ເຈົ້າຈົ່ງຖອຍກັບໄປເທີ້ນ

**ວັດຕະກະຊາດົກທີ ໕ ຈົບ**

## ໖. ສະກຸນະຊາດົກ (໓໖)
## ວ່າດ້ວຍນົກໂພທິສັດ

(ນົກໂພທິສັດເຫັນງ່າໄມ້ສຽດສີກັນເກີດໄຟປ່າ ຈຶ່ງກ່າວແກ່ ນົກຍູງວ່າ)

[໓໖] ນົກທັງຫຼາຍອາໄສຕົ້ນໄມ້ໃດ

ຕົ້ນໄມ້ນັ້ນປ່ອຍໄຟອອກມາ
ນີ້ ນົກທັງຫຼາຍ ພວກທ່ານຈົ່ງໜີໄປສູ່ທິດທັງຫຼາຍເທີ້ນ
ໄພໄດ້ເກີດມີແຕ່ຕົ້ນໄມ້ອັນເປັນບ່ອນເພິ່ງຂອງພວກເຮົາ

**ສະກຸນະຊາດົກທີ ໖ ຈົບ**

## ໗. ຕິດຕິຣະຊາດົກ (໓໗)
## ວ່າດ້ວຍນົກກະທາ

(ພຣະສາດສະດາ ຊົງຕິຕຽນພວກພິກຂຸສັບພັກຄີ ຜູ້ບໍ່ມີຄວາມເຄົາລົບຢຳເກງຕໍ່ພິກຂຸຜູ້ແກ່ກວ່າຈຶ່ງ ຕັດວ່າ)

[໓໗] ນໍຣະຊົນເຫຼົ່າໃດສະຫຼາດໃນທຳ
ປະພຶດອ່ອນນ້ອມຖ່ອມຕົນຕໍ່ບຸກຄົນຜູ້ຈະເລີນ໌ທັງຫຼາຍ
ນໍຣະຊົນເຫຼົ່ານັ້ນເປັນຜູ້ໄດ້ຮັບການສັນເສີນໃນປັດຈຸບັນ
ແລະມີສຸຄະຕິພົບໃນເບື້ອງໜ້າ

**ຕິດຕິຣະຊາດົກທີ ໗ ຈົບ**

## ໘. ພະກະຊາດົກ (໓໘)
## ວ່າດ້ວຍນົກຍາງ

(ຮຸກຂະເທວະດາໂພທິສັດສະຖິດຢູ່ທີ່ຕົ້ນກຸ່ມ ໄດ້ເຫັນເຫດອັດສະຈັນທີ່ ນົກຍາງຖືກປູ ໜີບຄໍຈົມ ນ້ຳຕາຍ ເມື່ອຈະໃຫ້ສາທຸການ ຈຶ່ງກ່າວວ່າ)

[໓໘] ຜູ້ໃຊ້ເລ້ຫຼ່ຽມຫຼອກລວງຜູ້ອື່ນ
ຈະພົບຄວາມສຸກຢູ່ໄດ້ບໍ່ດົນ
ຜູ້ໃຊ້ເລ້ຫຼ່ຽມຫຼອກລວງຜູ້ອື່ນນັ້ນ
ຕ້ອງປະສົບບາບກຳທີ່ຕົນເຮັດໄວ້
ເໝືອນນົກຍາງທີ່ຖືກປູໜີບຕາຍ

**ພະກະຊາດົກທີ ໘ ຈົບ**

## ໙. ນັນທະຊາດົກ (໓໙)
## ວ່າດ້ວຍນາຍນັນທະທາດ

(ກຸດຸມພີໂພທິສັດເມື່ອຈະບອກຂຸມຊັບແກ່ກຸມານຜູ້ເປັນລູກຂອງເພື່ອນຈຶ່ງກ່າວວ່າ)

[໓໙] ທາດຊື່ນັນທະ ເກີດຈາກນາງທາສີ ຢືນເວົ້າຄຳຫຍາບຢູ່ບ່ອນໃດ
ເຮົາຮູ້ວ່າມີກອງຣັດຕະນະແລະມາໄລຄຳຢູ່ບ່ອນນັ້ນ

**ນັນທະຊາດົກທີ ໙ ຈົບ**

## ໑໐. ຂະທິຣັງຄາຣະຊາດົກ (໔໐)
## ວ່າດ້ວຍຂຸມຖ່ານໄຟໄມ້ແຄນ

(ເສດຖີໂພທິສັດເມື່ອຈະໃຫ້ມານຜູ້ປະສົງຈະທຳລາຍຊີວິດພຣະປັດເຈກພຸດທະເຈົ້າ ແລະທຳລາຍໂຮງທານຮູ້ວ່າ ໂຕທ່ານຫຼືມານທີ່ມີກຳລັງ ມີອານຸພາບຫຼາຍກວ່າກັນ ຈຶ່ງກ່າວຄາຖານີ້ກັບພຣະປັດເຈກພຸດທະເຈົ້າວ່າ)

[໔໐] ຂ້າພະເຈົ້າຈະຕົກຂຸມຖ່ານໄຟມີຕີນຊີ້ຂຶ້ນ ມີຫົວປັກລົງກໍຕາມ
ຂ້າພະເຈົ້າຈະບໍ່ທຳຄວາມຊົ່ວອັນເປັນກຳບໍ່ປະເສີດອີກ
ຂໍນິມົນພຣະຜູ້ເປັນເຈົ້າຮັບບິນທະບາດນີ້ເທີ້ນ

**ຂະທິຣັງຄາຣະຊາດົກທີ ໑໐ ຈົບ**

**ກຸລາວະກະວັກທີ ໔ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

# ໕. ອັດຖະກາມະວັກ

## ໝວດວ່າດ້ວຍຜູ້ຕ້ອງການປະໂຫຍດ

## ໑. ໂລສະກະຊາດົກ (໔໑)

## ວ່າດ້ວຍຄົນໂລເລຕ້ອງເສົ້າໂສກ

(ພຣະໂພທິສັດເລົ່າເລື່ອງນາຍມິດຕະວິນທຸກະທີ່ບໍ່ເຮັດຕາມຄຳສອນຂອງຜູ້ຫວັງຄວາມຈະເລີນ
ຈຶ່ງໄດ້ຮັບທຸກແລ້ວ ໄດ້ກ່າວວ່າ)

[໔໑] ຜູ້ໃດທີ່ຄົນອື່ນຜູ້ມີຈິດເກື້ອກູນ ອ່ອນໂຍນ ກ່າວສອນຢູ່
ບໍ່ທຳຕາມຄຳສອນຂອງບຸກຄົນຜູ້ຫວັງຄວາມຈະເລີນ
ຜູ້ອະນຸເຄາະດ້ວຍເຫດອັນເປັນປະໂຫຍດ
ຜູ້ນັ້ນຍ່ອມເສົ້າໂສກ ເໝືອນມິດຕະວິນທຸກະຈັບຂາແບ້ແລ້ວເສົ້າໂສກຢູ່

**ໂລສະກະຊາດົກທີ ໑ ຈົບ**

## ໒. ກະໂປຕະກະຊາດົກ (໔໒)

## ວ່າດ້ວຍນົກກາງແກເຕືອນກາ

(ນົກກາງແກໂພທິສັດເຫັນກາປະສົບຄວາມພິນາດ ຈຶ່ງກ່າວວ່າ)

[໔໒] ຜູ້ໃດອັນບຸກຄົນຜູ້ຫວັງຄວາມຈະເລີນ
ອະນຸເຄາະດ້ວຍປະໂຫຍດເກື້ອກູນ
ກ່າວສອນຢູ່ ກໍບໍ່ເຮັດຕາມຄຳສັ່ງສອນ
ຜູ້ນັ້ນຍ່ອມເສົ້າໂສກຢູ່ຮ່ຳໄປ
ເໝືອນກາບໍ່ເຮັດຕາມຄຳຂອງນົກກາງແກຕົກຢູ່ໃນເງື້ອມມືຂອງສັດຕູ

**ກະໂປຕະກະຊາດົກທີ ໒ ຈົບ**

## ໓. ເວລຸກະຊາດົກ (໔໓)

## ວ່າດ້ວຍງູເວລຸກະ

(ດາບົດໂພທິສັດສັ່ງໃຫ້ທຳການເຜົາດາບົດທີ່ຖືກງູກັດຕາຍແລ້ວ ຈຶ່ງກ່າວສອນໝູ່ລືສີວ່າ)

[໔໓] ຜູ້ໃດທີ່ຄົນອື່ນຜູ້ມີຈິດເກື້ອກູນ ອ່ອນໂຍນ ກ່າວສອນຢູ່
ບໍ່ເຮັດນຳຄຳສອນຂອງບຸກຄົນຜູ້ຫວັງຄວາມຈະເລີນ
ຜູ້ອະນຸເຄາະດ້ວຍເຫດອັນເປັນປະໂຫຍດ
ຜູ້ນັ້ນຍ່ອມຖືກກຳຈັດນອນຕາຍຢູ່ ເໝືອນລືສີຜູ້ເປັນບິດາຂອງງູເວລຸກະ

**ເວລຸກະຊາດົກທີ ໓ ຈົບ**

## ໔. ມະກະສະຊາດົກ (໔໔)
## ວ່າດ້ວຍລູກຊາຍໂງ່ຂ້າຍຸງ

(ພໍ່ຄ້າໂພທິສັດເຫັນການກະທຳຂອງຊ່າງໄມ້ຜູ້ໂງ່ຈ້າ ຈຶ່ງກ່າວວ່າ)

[໔໔] ມີສັດຕູຜູ້ມີຄວາມຮູ້ຍັງປະເສີດກວ່າ
ສ່ວນມິດຜູ້ຂາດປັນຍາບໍ່ປະເສີດເລີຍ
ເພາະວ່າລູກຊາຍຜູ້ໂງ່ຈ້າຄິດວ່າ ເຮົາຈັກຂ້າຍຸງ
ແຕ່ໄດ້ທຸບຫົວພໍ່ໂຕເອງຊໍ້າ

**ມະກະສະຊາດົກທີ ໔ ຈົບ**

## ໕. ໂຣຫິນີຊາດົກ (໔໕)
## ວ່າດ້ວຍນາງໂຣຫິນີ

(ພຣະໂພທິສັດຮູ້ເລື້ອງທີ່ສາວໃຊ້ຊື່ງມານດາໃຊ້ໃຫ້ໄລ່ແມງວັນກັບໃຊ້ສາກຕີມານດາຈົນສິ້ນຊີວິດ
ຈຶ່ງກ່າວວ່າ)

[໔໕] ມີສັດຕູຜູ້ມີປັນຍາຍັງດີກວ່າມີຄົນອະນຸເຄາະທີ່ໂງ່
ທ່ານຈົ່ງເບິ່ງນາງໂຣຫິນີຊາດຊົ່ວ ຂ້າແມ່ແລ້ວເສົ້າໂສກຢູ່

**ໂຣຫິນີຊາດົກທີ ໕ ຈົບ**

## ໖. ອາຣາມະທູສະກະຊາດົກ (໔໖)
## ວ່າດ້ວຍລີງທຳລາຍສວນ

(ບຸຣຸດຜູ້ເປັນບັນດິດໄດ້ຟັງຄຳຂອງລີງ ຈຶ່ງກ່າວວ່າ)

[໔໖]　ຜູ້ບໍ່ສະຫຼາດໃນສິ່ງທີ່ເປັນປະໂຫຍດ ເຖິງຈະພໍ່າເພັງປະໂຫຍດ
ກໍບໍ່ສາມາດຈະນໍາຄວາມສຸກມາໄດ້ເລີຍ
ຄົນມີປັນຍາຊາມເຮັດປະໂຫຍດໃຫ້ເສຍຫາຍ ເໝືອນລີງເຝົ້າສວນ

**ອາຣາມະທູສະກະຊາດົກທີ ໖ ຈົບ**

## ໗. ວາຣຸນິທູສະກະຊາດົກ (໔໗)
## ວ່າດ້ວຍຜູ້ມີປັນຍາຊາມເຮັດສຸຣາໃຫ້ເສຍ

(ພຣະໂພທິສັດເລົ່າເລື່ອງຄົນໂງ່ບໍ່ສະຫຼາດໃນສິ່ງທີ່ເປັນປະໂຫຍດ ຈຶ່ງກ່າວວ່າ)

[໔໗]　ຜູ້ບໍ່ສະຫຼາດໃນສິ່ງທີ່ເປັນປະໂຫຍດ ເຖິງຈະພໍ່າເພັງປະໂຫຍດ
ກໍບໍ່ສາມາດຈະນໍາຄວາມສຸກມາໄດ້ເລີຍ
ຄົນມີປັນຍາຊາມຍ່ອມເຮັດປະໂຫຍດໃຫ້ເສຍຫາຍ
ເໝືອນນາຍໂກນທັນຍະເຮັດສຸຣາໃຫ້ເສຍ

**ວາຣຸນິທູສະກະຊາດົກທີ ໗ ຈົບ**

## ໘. ເວທັບພະຊາດົກ (໔໘)
## ວ່າດ້ວຍພາມຊື່ເວທັບພະ

(ພຣະໂພທິສັດຄິດເຖິງເລື້ອງຄົນທີ່ປາຖະໜາຄວາມຈະເລີນໂດຍວິທີທີ່ບໍ່ສົມຄວນ ໄດ້ປະສົບຄວາມພິນາດໃຫຍ່ຫຼວງ ຈຶ່ງກ່າວວ່າ)

[໔໘]　ຜູ້ໃດປາຖະໜາປະໂຫຍດໂດຍອຸບາຍອັນບໍ່ແຍບຍົນ
ຜູ້ນັ້ນຍ່ອມເດືອດຮ້ອນ ເໝືອນໂຈນຊາວແຄວ້ນເຈຕະ
ຂ້າເວທັບພະພາມແລ້ວເຖິງຄວາມພິນາດທັງໝົດ

**ເວທັບພະຊາດົກທີ ໘ ຈົບ**

## ໙. ນັກຂັດຕະຊາດົກ (໔໙)
## ວ່າດ້ວຍການຖືເລີກຖືຍາມ

(ບຸຣຸດຜູ້ເປັນບັນດິດເຫັນຊາວພຣະນະຄອນທະເລາະກັນເລື້ອງເລີກ ຈຶ່ງກ່າວວ່າ)

[໔໙] ປະໂຫຍດໄດ້ລ່ວງເລີຍຄົນໂງ່ຈົ້າທີ່ມົວແຕ່ຖ້າຖ້າເລີກຍາມຢູ່
ປະໂຫຍດນັ້ນເອງເປັນເລີກຂອງປະໂຫຍດ
ດວງດາວທັງຫຼາຍຈັກຊ່ອຍຫຍັງໄດ້

**ນັກຂັດຕະຊາດົກທີ ໙ ຈົບ**

## ໑໐. ທຸມະເມທະຊາດົກ (໕໐) ວ່າດ້ວຍຄົນໂງ່

(ພົມມະທັດຕະກຸມານໂພທິສັດ ເມື່ອຈະປະກາດເລື້ອງໃຫ້ຄວັກຫົວໃຈຄົນໂງ່ທຳການບວງສວງເທວະດາ ຈຶ່ງກ່າວວ່າ)

[໕໐] ການບູຊາຍັນຂ້າພະເຈົ້າໄດ້ຈົມໄວ້ແລ້ວດ້ວຍຄົນໂງ່ ໑,໐໐໐ ຄົນ
ບັດນີ້ ຄົນທີ່ບໍ່ປະພຶດທຳມີຢູ່ເປັນຈຳນວນຫຼາຍ
ເຮົາຈັກບູຊາຍັນ

**ທຸມະເມທະຊາດົກທີ ໑໐ ຈົບ**

**ອັດຖະການະວັກທີ ໕ ຈົບ**

# ລວມຊາດົກທີ່ມີໃນວັກນີ້ ຄື

໑. ໂລສະກະຊາດົກ
໒. ເວລຸກະຊາດົກ
໓. ໂຣຫິນີຊາດົກ
໔. ອາຣຸມີທູສະກະຊາດົກ
໕. ນັກຂັດຕະຊາດົກ
໖. ກະໂປຕະກະຊາດົກ
໗. ມະກະສະຊາດົກ
໘. ອາຣາມະທູສະກະຊາດົກ
໙. ເວທັບພະຊາດົກ
໑໐. ທຸມະເມທະຊາດົກ

**ປະຖະມະປັນດ ຈົບ**

# ຜ. ອາສີງສະວັກ

## ໝວດວ່າດ້ວຍຄວາມຫວັງ

## ໑. ມະຫາສີລະວະຊາດົກ (໕໑)

### ວ່າດ້ວຍພຣະເຈົ້າມະຫາສີລະວະ

(ພຣະເຈົ້າສີລະວະມະຫາຣາດຊົງດຳຣິເຖິງຜົນຂອງຄວາມພຽນ ຈຶ່ງກ່າວຄາຖານີ້ວ່າ)

[໕໑] ເປັນຄົນຕ້ອງຫວັງຢູ່ສະເໝີ ຄົນສະຫຼາດບໍ່ຄວນທໍ້ແທ້
ເຮົາເຫັນຕົວເອງເປັນຕົວຢ່າງ
ປາຖະໜາແນວໃດກໍໄດ້ແນວນັ້ນ

**ມະຫາສີລະວະຊາດົກທີ ໑ ຈົບ**

## ໘. ຈູລະຊະນົກຊາດົກ (໕໘)

### ວ່າດ້ວຍພຣະຈູລະຊະນົກ

(ພຣະມະຫາຊະນົກຊົງດຳຣິເຖິງຜົນຂອງຄວາມພຽນ ຈຶ່ງກ່າວຄາຖານີ້ວ່າ)

[໕໘] ເປັນຄົນຕ້ອງພະຍາຍາມຢູ່ສະເໝີ ຄົນສະຫຼາດບໍ່ຄວນທໍ້ແທ້
ເຮົາເຫັນຕົວເອງເປັນຕົວຢ່າງ
ຖືກເຂົາຊ່ອຍໃຫ້ຂຶ້ນຈາກນໍ້າມາບົນບົກໄດ້

**ຈູລະຊະນົກຊາດົກທີ ໘ ຈົບ**

## ໙. ປຸນນະປາຕິຊາດົກ (໕໙)

### ວ່າດ້ວຍການລອງດ້ວຍສຸຣາເຕັມໄຫ

(ເສດຖີໂພທິສັດເມື່ອຈະທຳລາຍຄວາມພໍໃຈຂອງພວກນັກເລງ ຈຶ່ງກ່າວຄາຖານີ້ວ່າ)

[໕໙] ໄຫເຫຼົ້າຍັງຄົງເຕັມຢູ່ຄືເກົ່າ
ການກ່າວຍ້ອງຍໍຄົງເປັນຄຳບໍ່ຈິງ
ເພາະອາການຢ່າງນີ້ ເຮົາຈຶ່ງຮູ້ວ່າ ເຫຼົ້ານີ້ບໍ່ດີແທ້

**ປຸນນະປາຕິຊາດົກທີ ໙ ຈົບ**

## ໔. ຜະລະຊາດົກ (໕໔)
## ວ່າດ້ວຍການຮູ້ຈັກໝາກໄມ້

(ພໍ່ຄ້າກວຽນໂພທິສັດເລົ່າເລື່ອງທີ່ຕົນຮູ້ວ່າຕົ້ນໄມ້ນັ້ນບໍ່ແມ່ນຕົ້ນໝາກມ່ວງດ້ວຍເຫດ ໔ ປະການ ຈຶ່ງກ່າວວ່າ)

[໕໔] ຕົ້ນໄມ້ນີ້ຄົນຂຶ້ນໄດ້ບໍ່ຍາກ ທັງຢູ່ບໍ່ໄກຈາກໝູ່ບ້ານ
ຍ້ອນເຫດ ໔ ປະການນີ້ ເຮົາຈຶ່ງຮູ້ໄດ້ວ່າ ຕົ້ນໄມ້ນີ້ມີຜົນບໍ່ດີ

**ຜະລະຊາດົກທີ ໔ ຈົບ**

## ໕. ປັນຈາວຸທະຊາດົກ (໕໕)
## ວ່າດ້ວຍພຣະກຸມານຜູ້ມີອາວຸດ ໕ ຢ່າງ

(ພຣະສາດສະດາຊົງປະມວນພຣະທຳມະເທດສະໜາມາຕັດພຣະຄາຖານີ້ວ່າ)

[໕໕] ນໍຣະຊົນໃດມີຈິດບໍ່ທໍ້ຖໍ້ ມີໃຈບໍ່ທົດທູ່
ບຳເພັນກຸສົນທຳເພື່ອບັນລຸຄວາມກະເສມຈາກໂຍຄະ
ນໍຣະຊົນນັ້ນເພິ່ງບັນລຸຄວາມສິ້ນໄປແຫ່ງສັງໂຍດທັງປວງໄດ້ໂດຍລຳດັບ

**ປັນຈາວຸທະຊາດົກທີ ໕ ຈົບ**

## ໖. ກັນຈະນັກຂັນທະຊາດົກ (໕໖)
## ວ່າດ້ວຍພຣະໂພທິສັດແບ່ງແທ່ງທອງ

(ພຣະຜູ້ມີພຣະພາກຊົງປະມວນທຳມະເທດສະໜາມາຕັດພຣະຄາຖານີ້ວ່າ)

[໕໖] ນໍຣະຊົນໃດມີຈິດແຈ່ມໃສ ມີໃຈເບີກບານ
ບຳເພັນກຸສົນທຳເພື່ອບັນລຸຄວາມກະເສມຈາກໂຍຄະ
ນໍຣະຊົນນັ້ນເພິ່ງບັນລຸຄວາມສິ້ນໄປແຫ່ງສັງໂຍດທັງປວງໄດ້ໂດຍລຳດັບ

**ກັນຈະນັກຂັນທະຊາດົກທີ ໖ ຈົບ**

## ໗. ວານະຣິນທະຊາດົກ (໕໗)
## ວ່າດ້ວຍພະຍາວານອນພົ້ນຈາກສັດຕູ

(ແຂ້ກ່າວເຖິງບຸກຄົນທີ່ປະກອບດ້ວຍຄຸນນະທຳ ໔ ປະການ ຈຶ່ງປາບສັດຕູໄດ້ວ່າ)

[໔໗] ພະຍາວານອນ ຜູ້ໃດມີທຳ ໔ ປະການນີ້ ຄື
(໑) ສັດຈະ (໒) ທຳມະ (໓) ທິຕິ (໔) ຈາຄະ[១] ເຊັ່ນກັບທ່ານ
ຜູ້ນັ້ນຍ່ອມຄອບງຳສັດຕູທີ່ຕົນພົບເຫັນໄດ້

**ວານະຣິນທະຊາດົກທີ ໗ ຈົບ**

## ໘. ຕະໂຍທຳມະຊາດົກ (໔໘)
## ວ່າດ້ວຍທຳ ໓ ປະການຂອງພະຍາວານອນ

(ຣາກສົດຊົມເຊີຍພຣະໂພທິສັດວ່າ)

[໔໘] ພະຍາວານອນ ຜູ້ໃດມີທຳ ໓ ປະການເຫຼົ່ານີ້ ຄື
(໑) ຄວາມຂະຫຍັນ (໒) ຄວາມແກ່ກ້າ (໓) ປັນຍາ ເຊັ່ນກັບທ່ານ
ຜູ້ນັ້ນຍ່ອມຄອບງຳສັດຕູທີ່ຕົນພົບເຫັນໄດ້

**ຕະໂຍທຳມະຊາດົກທີ ໘ ຈົບ**

## ໙. ເພຣິວາທະກະຊາດົກ (໔໙)
## ວ່າດ້ວຍການຕີກອງເກີນປະມານເຮັດໃຫ້ເສຍຊັບ

(ໃນອະດີດຕະການ ພຣະໂພທິສັດເກີດໃນສະກຸນຄົນຕີກອງໄດ້ກ່າວເຖິງວິທີຕີກອງວ່າ)

[໔໙] ເມື່ອຈະຕີກອງກໍຕີເທີ້ນ ແຕ່ຢ່າຕີໃຫ້ຫຼາຍເກີນໄປ
ຍ້ອນການຕີຫຼາຍເກີນໄປເປັນຄວາມເສຍຫາຍ
ຊັບຕັ້ງຮ້ອຍທີ່ເຮົາໄດ້ມາຍ້ອນການຕີກອງ
ໄດ້ສູນເສຍໄປເພາະເຈົ້າຕີຫຼາຍໂພດ

**ເພຣິວາທະກະຊາດົກທີ ໙ ຈົບ**

## ໑໐. ສັງຂະທະມະຊາດົກ (໕໐)
## ວ່າດ້ວຍການເປົ່າຫອຍສັງເກີນປະມານເຮັດໃຫ້ເສຍຊັບ

(ພຣະໂພທິສັດເກີດໃນສະກຸນຄົນເປົ່າຫອຍສັງ ເມື່ອຈະຫ້າມບິດາຜູ້ເປົ່າຫອຍສັງບໍ່ຢຸດຈຶ່ງກ່າວວ່າ)

[໕໐] ເມື່ອຈະເປົ່າຫອຍສັງກໍເປົ່າເທີ້ນ ແຕ່ຢ່າເປົ່າໃຫ້ຫຼາຍເກີນໄປ

ຍ້ອນການເປົ່າຫຼາຍເກີນໄປເປັນຄວາມເສຍຫາຍ
ພໍ່ເມື່ອທ່ານເປົ່າຫຼາຍເກີນໄປ
ຈັກເຮັດສົມບັດທີ່ໄດ້ມາຍ້ອນການເປົ່າຫອຍສັງໃຫ້ພິນາດໄປ

**ສັງຂະທະມະຊາດົກທີ ໑໐ ຈົບ**

**ອາສິງສະວັກທີ ໖ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ມະຫາສີລະວະຊາດົກ
໒. ຈູລະຊະນົກຊາດົກ
໓. ປຸນນະປາຕິຊາດົກ
໔. ຜະລະຊາດົກ
໕. ປັນຈາວຸທະຊາດົກ
໖. ກັນຈະນັກຂັນທະຊາດົກ
໗. ວານະຣິນທະຊາດົກ
໘. ຕະໂຍທຳມະຊາດົກ
໙. ເພຣິວາທະກະຊາດົກ
໑໐. ສັງຂະທະມະຊາດົກ

# ໗. ອິດຖີວັກ

## ໝວດວ່າດ້ວຍຍິງ

## ໑. ອະສາຕະມັນຕະຊາດົກ (໖໑)

## ວ່າດ້ວຍອະສາຕະມົນ

(ມານົບຜູ້ເປັນສິດຂອງພຣະໂພທິສັດເຫັນໂທດຂອງຍິງ ຈຶ່ງປະກາດຄວາມປະສົງຂອງຕົນທີ່ຈະອອກບວດວ່າ)

[໖໑] ຂຶ້ນຊື່ວ່າຍິງໃນໂລກນີ້ບໍ່ໜ້າຍິນດີ
ເພາະຍິງເຫຼົ່ານັ້ນບໍ່ມີຂອບເຂດ ມີແຕ່ຄວາມກຳໜັດ ຄະນອງ
ເໝືອນແປວໄຟໄໝ້ທຸກສິ່ງທຸກຢ່າງ
ຂ້າພະເຈົ້າຈັກລະຖິ້ມຍິງທັງຫຼາຍເຫຼົ່ານັ້ນໄປບວດເພີ່ມພູນວິເວກ

**ອະສາຕະມັນຕະຊາດົກທີ ໑ ຈົບ**

## ໘. ອັນທະພູຕະຊາດົກ (໖໘)
## ວ່າດ້ວຍການໄວ້ໃຈພັນລະຍາທີ່ລ້ຽງມາຕັ້ງແຕ່ເກີດ

(ພຣະຣາຊາໂພທິສັດຕັດກັບພາມປຸໂຣຫິດ ເຖິງຍິງຜູ້ປາຖະໜາຊາຍຄົນດຽວບໍ່ມີວ່າ)

[໖໘] ພາມບໍ່ຮູ້ອຸບາຍທີ່ພັນລະຍາໃຊ້ຜ້າຜູກໜ້າແລ້ວໃຊ້ໃຫ້ດີດພິນຢູ່
ພັນລະຍາທີ່ລ້ຽງມາຕັ້ງແຕ່ຢູ່ໃນທ້ອງ (ຍັງເຮັດໄດ້ເຊັ່ນນີ້)
ແລ້ວໃຜຈະໄວ້ໃຈໃນພັນລະຍາເຫຼົ່ານັ້ນໄດ້

**ອັນທະພູຕະຊາດົກທີ ໘ ຈົບ**

## ໙. ຕັກກະປັນທິຕະຊາດົກ (໖໙)
## ວ່າດ້ວຍຕັກກະບັນດິດ

(ພຣະສາດສະດາເມື່ອຕັດອະດີດນິທານະແລ້ວຈຶ່ງຕັດພຣະຄາຖານີ້ວ່າ)

[໖໙] ທຳມະດາຍິງມີນິໄສມັກໂກດ ອະກະຕັນຍູ
ມັກເວົ້າສໍ່ສຽດ ມັກທຳລາຍມິດ
ພິກຂຸ ທ່ານຈົ່ງປະພຶດພົມມະຈັນ ຈັກບໍ່ເສື່ອມຈາກສຸກ

**ຕັກກະປັນທິຕະຊາດົກທີ ໙ ຈົບ**

## ໔. ທຸຣາຊານະຊາດົກ (໖໔)
## ວ່າດ້ວຍພາວະຂອງຍິງຮູ້ໄດ້ຍາກ

(ອາຈານທິສາປາໂມກໂພທິສັດຫວັງຈະສອນພາມມານົບຜູ້ເປັນສິດ ຈຶ່ງກ່າວວ່າ)

[໖໔] ຢ່າດີໃຈເລີຍວ່າຍິງນີ້ຕ້ອງການເຮົາ
ຢ່າເສຍໃຈໄປເລີຍວ່າຍິງນີ້ບໍ່ຕ້ອງການເຮົາ
ພາວະຂອງຍິງຮູ້ໄດ້ຍາກ ເໝືອນປາລ່ອງລອຍຢູ່ໃນນ້ຳ

**ທຸຣາຊານະຊາດົກທີ ໔ ຈົບ**

## ໕. ອະນະພິຣະຕີຊາດົກ (໖໕)
## ວ່າດ້ວຍບຸຣຸດບໍ່ຄວນຖືໂກດຍິງ

(ອາຈານທິສາປາໂມກໂພທິສັດຫວັງຈະສອນສິດ ຈຶ່ງກ່າວວ່າ)

[໖໕]　　ແມ່ນ້ຳ ຫົນທາງ ໂຮງສຸຣາ ສະພາ
ແລະນ້ຳສ້າງສຳລັບດື່ມເປັນສັນໃດ
ທຳມະດາຍິງໃນໂລກກໍສັນນັ້ນ
ບັນດິດທັງຫຼາຍຍ່ອມບໍ່ຖືໂກດ

**ອະນະພິຣະຕິຊາດົກທີ ໕ ຈົບ**

## ໖. ມຸທຸລັກຂະນະຊາດົກ (໖໖)
## ວ່າດ້ວຍພຣະໂພທິສັດປາຖະໜານາງມຸທຸລັກຂະນາ

(ດາບົດໂພທິສັດເສື່ອມຈາກຊານເຂົ້າໄປເຝົ້າພຣະຣາຊາຂາບທູນແລ້ວ ຈຶ່ງກ່າວວ່າ)

[໖໖]　　ຄັ້ງກ່ອນ ເຮົາຍັງບໍ່ໄດ້ພຣະນາງມຸທຸລັກຂະນາ
ຄວາມປາຖະໜາມີຢູ່ຢ່າງດຽວ
ເມື່ອໄດ້ພຣະນາງມຸທຸລັກຂະນາຜູ້ມີພຣະເນດໃຫຍ່ງົດງາມ
ຄວາມສຳເລັດໃນປາຖະໜານີ້
ນຳມາເຊິ່ງຄວາມຕ້ອງການຂຶ້ນອີກຫຼາຍຢ່າງ

**ມຸທຸລັກຂະນະຊາດົກທີ ໖ ຈົບ**

## ໗. ອຸດສັງຄະຊາດົກ (໖໗)
## ວ່າດ້ວຍຍິງຫາບຸດຫາສາມີໄດ້ງ່າຍເໝືອນຫາຂອງທີ່ຖົງເນັບແອວ

(ຍິງທີ່ສາມີ ລູກແລະອ້າຍຖືກຣາດຊະບຸຣຸດຈັບໄປຖວາຍພຣະຣາຊາ ທູນຂໍອ້າຍກັບຄືນ ຖືກພຣະຣາຊາຕັດຖາມ ຂາບທູນເຖິງເຫດທີ່ບຸດແລະສາມີຫາໄດ້ງ່າຍ ສ່ວນອ້າຍ ຫາໄດ້ຍາກກວ່າ)

[໖໗]　　ຂໍເດຊະພຣະອົງຜູ້ສົມມຸດຕິເທບ
ບຸດຂ້ານ້ອຍຫາໄດ້ງ່າຍເໝືອນມ່ຽງຢູ່ຖົງເນັບແອວ
ເມື່ອຂ້ານ້ອຍຍ່າງໄປຕາມທາງ ສາມີກໍຫາໄດ້ງ່າຍຄືກັນ
ແຕ່ຂ້ານ້ອຍຍັງບໍ່ເຫັນສະຖານທີ່
ທີ່ຈະຫາອ້າຍຜູ້ສະເໝືອນຮ່ວມອຸທອນດຽວກັນໄດ້ເລີຍ

**ອຸດສັງຄະຊາດົກທີ ໗ ຈົບ**

## ໘. ສາເກຕະຊາດົກ (ຜ໘)
## ວ່າດ້ວຍພຣະພຸດທະເຈົ້າຕັ້ງສະເທວີຍພຣະຊາດເປັນບຸດພາມຊາວເມືອງສາເກດ

(ພຣະສາດສະດາຊົງເລົ່າເລື່ອງທີ່ພຣະອົງຊົງເຕີບໃຫຍ່ໃນມືຂອງພາມແລະພາມມະນີ ໓,໐໐໐ ຊາດ ຕັດພຣະຄາຖານີ້ວ່າ)

[ຜ໘] ບຸກຄົນມີຈິດເຫຼື້ອມໃສແລະມີໃຈຝັງແໜ້ນຢູ່ໃນບຸກຄົນໃດ
ບຸກຄົນຈະສະໜິດສະໜົມຄຸ້ນເຄີຍໃນບຸກຄົນນັ້ນ
ແມ່ນວ່າຈະບໍ່ເຄີຍພົບເຫັນກັນ

**ສາເກຕະຊາດົກທີ ໘ ຈົບ**

## ໙. ວິສະວັນຕະຊາດົກ (ຜ໙)
## ວ່າດ້ວຍຕາຍສາດີກວ່າດູດພິດກັບຄືນເຂົ້າໄປ

(ງູຖືກໝໍງູບັງຄັບ ໄດ້ຕອບໝໍງູດ້ວຍຄຳວ່າ)

[ຜ໙] ພິດທີ່ຄາຍອອກແລ້ວນັ້ນ ເປັນຂອງສົກກະປົກ
ເຮົາຕາຍສາຍັງດີກວ່າທີ່ເຮົາຈະຕ້ອງດູດພິດ
ທີ່ຄາຍອອກແລ້ວກັບຄືນມາຍ້ອນເຫດແຫ່ງມີຊີວິດ

**ວິສະວັນຕະຊາດົກທີ ໙ ຈົບ**

## ໑໐. ກຸດທາລະຊາດົກ (ກ໐)
## ວ່າດ້ວຍກຸດທາລະບັນດິດ

(ລືສີໂພທິສັດຊື່ກຸດທາລະບັນດິດສະແດງທຳໂຜດພຣະຣາຊາວ່າ)

[ກ໐] ຄວາມຊະນະໃດທີ່ບຸກຄົນຊະນະແລ້ວກັບພ່າຍແພ້ອີກ
ຄວາມຊະນະນັ້ນບໍ່ເປັນການຊະນະທີ່ດີເລີຍ
ສ່ວນຄວາມຊະນະໃດທີ່ບຸກຄົນຊະນະແລ້ວບໍ່ກັບພ່າຍແພ້ອີກ
ຄວາມຊະນະນັ້ນເປັນການຊະນະທີ່ປະເສີດ

**ກຸດທາລະຊາດົກທີ ໑໐ ຈົບ**

**ອິດຖີວັກທີ ໗ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື



# ໗. ວະຣຸນະວັກ

## ໝວດວ່າດ້ວຍໄມ້ກຸ່ມ

## ໑. ວະຣຸນະຊາດົກ (໗໑)

## ວ່າດ້ວຍມານົບຫັກໄມ້ກຸ່ມ

(ພຣະໂພທິສັດເປັນອາຈານທິສາປາໂມກໄດ້ຟັງວຽກງານທີ່ມານົບເຮັດຢູ່ ຈຶ່ງບອກເຖິງເຫດແຫ່ງຄວາມເສື່ອມວ່າ)

[໗໑] ວຽກເຊິ່ງຄວນເຮັດກ່ອນແຕ່ເອົາມາເຮັດພາຍຫຼັງ
ເຂົາຈະເດືອດຮ້ອນໃນພາຍຫຼັງ ເໝືອນມານົບຫັກໄມ້ກຸ່ມ

**ວະຣຸນະຊາດົກທີ ໑ ຈົບ**

## ໔. ສີລະວະນາຄະຊາດົກ (໗໔)

## ວ່າດ້ວຍພະຍາຊ້າງສີລະວະ

(ຣຸກຂະເທວະດາສະຖິດຢູ່ໃນເຂດປ່ານັ້ນໃນເວລາທີ່ຄົນຊົ່ວຖືກແຜ່ນດິນສູບຈຶ່ງກ່າວວ່າ)

[໗໔] ຄົນອະກະຕັນຍູຖ້າຈັບຜິດຢູ່ຕະຫຼອດ
ເຖິງຈະໃຫ້ແຜ່ນດິນທັງໝົດ
ກໍເຮັດໃຫ້ເຂົາເພິ່ງພໍໃຈບໍ່ໄດ້

**ສີລະວະນາຄະຊາດົກທີ ໔ ຈົບ**

## ໓. ສັດຈັງກິຣະຊາດົກ (໗໓)
### ວ່າດ້ວຍຄວາມຈິງທີ່ໄດ້ຍິນມາ

(ພຣະລືສີໂພທິສັດບໍ່ຄໍ່າຄວນບໍ່ສະຫົກສະທ້ານໃນທີ່ຕົນຖືກຕີຈຶ່ງກ່າວວ່າ)

[໗໓] ໄດ້ຍິນວ່າ ຄົນບາງພວກໃນໂລກນີ້
ໄດ້ກ່າວຄວາມຈິງໄວ້ຢ່າງນີ້ວ່າ
ໄມ້ລອຍນໍ້າຍັງດີກວ່າ
ສ່ວນຄົນບາງຄົນທີ່ປະທຸດສະຮ້າຍມິດບໍ່ດີເລີຍ

**ສັດຈັງກິຣະຊາດົກທີ ໓ ຈົບ**

## ໔. ຣຸກຂະທຳມະຊາດົກ (໗໔)
### ວ່າດ້ວຍທຳສຳລັບຕົ້ນໄມ້

(ພຣະໂພທິສັດສະແດງທຳແກ່ເຫຼົ່າເທວະດາວ່າ)

[໗໔] ຍາດຍິ່ງມີຫຼາຍຍິ່ງດີ
ແມ່ນຕົ້ນໄມ້ທີ່ເກີດໃນປ່າຍິ່ງມີຫຼາຍກໍຍິ່ງດີ
ຕົ້ນໄມ້ທີ່ຢືນຕົ້ນຢູ່ໂດດດ່ຽວ
ເຖິງຈະໃຫຍ່ໂຕ ແຕ່ລົມກໍຍ່ອມພັດໃຫ້ຫັກໂຄ່ນໄດ້

**ຣຸກຂະທຳມະຊາດົກທີ ໔ ຈົບ**

## ໕. ມັດສະຊາດົກ (໗໕)
### ວ່າດ້ວຍປາອ້ອນວອນຂໍຝົນ

(ປາໂພທິສັດຮຽກພຣະເຈົ້າປັດຊຸນນະເທບວ່າ)

[໗໕] ປັດຊຸນນະເທບ ທ່ານຈົ່ງຮ້ອງຄຳຣາມໃຫ້ຝົນຕົກມາ
ທຳລາຍຂຸມຊັບຂອງຝູງກາ ເຮັດຝູງກາໃຫ້ໄດ້ຮັບຄວາມເສົ້າໂສກ
ແລະຊ່ອຍປົດເປື້ອງຂ້າພະເຈົ້າແລະໝູ່ຍາດ
ໃຫ້ພົ້ນຈາກຄວາມເສົ້າໂສກເທີ້ນ

**ມັດສະຊາດົກທີ ໕ ຈົບ**

## ໖. ອະສັງກິຍະຊາດົກ (ກ໖)
## ວ່າດ້ວຍຄວາມບໍ່ຫວາດຣະແວງ

(ລືສີໂພທິສັດສະແດງທຳແກ່ພວກພໍ່ຄ້າກວຽນວ່າ)

[ກ໖] ເຮົາບໍ່ມີຄວາມຫວາດຣະແວງໃນໝູ່ບ້ານ
ທັງບໍ່ມີຄວາມຢ້ານໃນປ່າ
ເຮົາມຸ້ງຂຶ້ນສູ່ທາງກົງດ້ວຍເມດຕາແລະກະລຸນາ

**ອະສັງກິຍະຊາດົກທີ ໖ ຈົບ**

## ໗. ມະຫາສຸປິນະຊາດົກ (ກ໗)
## ວ່າດ້ວຍມະຫາສຸບິນ

(ພຣະເຈົ້າພົມທັດຕັດຣອດພຣະສຸບິນໃຫ້ດາບົດໂພທິສັດຟັງຕາມທີ່ໄດ້ຊົງສຸບິນວ່າ)

[ກ໗] ພະຍາງົວອຸສະພະ ໝູ່ໄມ້ ແມ່ງົວ ງົວຜູ້
ມ້າ ຖາດຄຳ ໝາຈອກ ໝໍ້ນ້ຳ
ສະໂບກຂະຣະນີ ເຂົ້າບໍ່ສຸກ ແກ່ນຈັນ
ນ້ຳເຕົ້າຈົມນ້ຳ ຫີນລອຍນ້ຳ ກົບກືນກິນງູເຫົ່າ
ຫົງຄຳທັງຫຼາຍແວດລ້ອມກາ
ເສືອເຫຼືອງຢ້ານແບ້
ຄວາມຝັນເປັນໄປໂດຍວິປະຣິດ
ແຕ່ຄວາມຝັນນັ້ນຍັງບໍ່ເປັນຈິງໃນຍຸກນີ້

**ມະຫາສຸປິນະຊາດົກທີ ໗ ຈົບ**

## ໘. ອິນລິສະຊາດົກ (ກ໘)
## ວ່າດ້ວຍອິນລິສະເສດຖີ

(ຊ່າງຕັດຜົມໂພທິສັດຖືກພຣະຣາຊາຕັດສັ່ງໃຫ້ຫາອິນລິສະເສດຖີ ເມື່ອບໍ່ສາມາດຈະນຳອິນລິສະເສດຖີມາໄດ້ ຈຶ່ງຂາບທູນວ່າ)

[ກ໘] ຄົນທັງ ໘ ເປັນຄົນກະຈອກ ເປັນຄົນງ່ອຍເປ້ຍ

ເປັນຄົນຕາເຫຼ່ ມີ ປົມງອກເທິງຫົວ
ຂ້າພຣະອົງບໍ່ຮູ້ຈັກວ່າ ຄົນໃດຄືອິນລີສະເສດຖີ

**ອິນລີສະຊາດົກທີ ໗ ຈົບ**

## ໙. ຂະຣັດສະຣະຊາດົກ (໗໙)
## ວ່າດ້ວຍສຽງດັ່ງອຶກກະທຶກຄຶກໂຄມ

(ພຣະໂພທິສັດກ່າວຄາຖານີ້ຕຳໜິຫົວໜ້າເຂດຜູ້ຮ່ວມມືກັບພວກໂຈນປຸ້ນຊາວບ້ານວ່າ)

[໗໙] ເວລາໃດ ຊາວບ້ານຖືກປຸ້ນ ຝູງງົວຖືກປາດ
ບ້ານເຮືອນຖືກເຜົາວອດວາຍ ຜູ້ຄົນຖືກເກນໄປ
ເວລານັ້ນ ລູກທີ່ຖືກແມ່ປະຖິ້ມ[១]
ຈຶ່ງມາຕີກອງຈົນອຶກກະທຶກຄຶກໂຄມ

**ຂະຣັດສະຣະຊາດົກທີ ໙ ຈົບ**

## ໑໐. ພີມະເສນະຊາດົກ (໘໐)
## ວ່າດ້ວຍທ່ານພີມະເສນະມັກເວົ້າໃຫຍ່ໂອ້ອວດ

(ຈູລະທະນຸກຄະທະບັນດິດໂພທິສັດກ່າວຕຳໜິພີມະເສນະ ຜູ້ມັກເວົ້າໃຫຍ່ໂອ້ອວດວ່າ)

[໘໐] ພີມະເສນະ ຄຳທີ່ທ່ານຂົ່ມຂູ່ເວົ້າໃຫຍ່ໄວ້ໃນຕອນທຳອິດ
ແຕ່ຕອນຫຼັງທ່ານເຖິງກັບຍ່ຽວຮາດ
ຄຳເວົ້າໃຫຍ່ເຖິງການຮົບແລະອາການສັ່ນຂອງທ່ານ
ທັງ ໒ ຢ່າງນີ້ຈັ່ງແມ່ນບໍ່ເຂົ້າກັນເລີຍ

**ພີມະເສນະຊາດົກທີ ໑໐ ຈົບ**

**ວະຣຸນະວັກທີ ໘ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ວະຣຸນະຊາດົກ
໒. ສີລະວະນາຄະຊາດົກ
໓. ສັດຈັງກີຣະຊາດົກ
໔. ຣຸກຂະທຳມະຊາດົກ
໕. ມັດສະຊາດົກ
໖. ອະສັງກິຍະຊາດົກ

៧. ມະຫາສຸປິນະຊາດົກ ၉. ອິນລີສະຊາດົກ

ໜ. ຂະຣັດສະຣະຊາດົກ ໑໐. ພີມະເສນະຊາດົກ

# ໙. ອະປາຍິມຫະວັກ

## ໝວດວ່າດ້ວຍການດື່ມສຸຣາ

## ໑. ສຸຣາປານະຊາດົກ (໘໑)

## ວ່າດ້ວຍໂທດຂອງການດື່ມສຸຣາ

(ເຫຼົ່າດາບົດຖືກພຣະໂພທິສັດເຊິ່ງເປັນອາຈານຖາມ ຈຶ່ງບອກເລື້ອງທີ່ພວກຕົນດື່ມສຸຣາເມົາແລ້ວ ພາກັນຟ້ອນລຳຂັບຮ້ອງວ່າ)

[໘໑] ພວກຂ້ານ້ອຍໄດ້ພາກັນດື່ມ ພາກັນຟ້ອນລຳ ພາກັນຂັບຮ້ອງແລ້ວ
ກໍພາກັນຮ້ອງໄຫ້ ເພາະດື່ມສຸຣາທີ່ເຮັດໃຫ້ສັນຍາວິປະຣິດ
ແຕ່ຍັງດີທີ່ບໍ່ໄດ້ກາຍເປັນລີງໃຫ້ເຫັນ

**ສຸຣາປານະຊາດົກທີ ໑ ຈົບ**

## ໘. ມິດຕະວິນທະກະຊາດົກ (໘໘)

## ວ່າດ້ວຍນາຍມິດຕະວິນທະກະຖືກກົງຈັກຫີນບົດປັ່ນ

(ເທບພະບຸດໂພທິສັດເຫັນນາຍມິດຕະວິນທະຕົກນະຣົກຈຶ່ງກ່າວວ່າ)

[໘໘] ທ່ານລ່ວງເລີຍຜາສາດແກ້ວຜະເລີກ
ຜາສາດເງິນ ແລະຜາສາດແກ້ວມະນີໄປແລ້ວ
ມາຖືກກົງຈັກຫີນບົດປັ່ນຢູ່
ທ່ານຈັກບໍ່ພົ້ນຈາກກົງຈັກຫີນຕາບເທົ່າທີ່ຍັງມີຊີວິດຢູ່

**ມິດຕະວິນທະກະຊາດົກທີ ໘ ຈົບ**

## ໓. ກາລະກັນນິຊາດົກ (໘໓)

## ວ່າດ້ວຍມິດຊື່ກາລະກັນນີ

(ເສດຖີໂພທິສັດເວົ້າທັດທານພວກຄົນທີ່ໃຫ້ໄລ່ມິດອອກຈາກເຮືອນວ່າ)

[໗໖] ບຸກຄົນຊື່ວ່າເປັນມິດເພາະຍ່າງຮ່ວມກັນ ໗ ກ້າວທໍ່ນັ້ນ
ຊື່ວ່າເປັນສະຫາຍເພາະຍ່າງຮ່ວມກັນ ໑໒ ກ້າວ
ຊື່ວ່າເປັນຍາດເພາະຢູ່ຮ່ວມກັນ ໑ ເດືອນຫຼືເຄິ່ງເດືອນ
ຊື່ວ່າສະເໝີກັບຕົນກໍເພາະຢູ່ຮ່ວມກັນຍິ່ງກວ່ານັ້ນ
ຂ້າພະເຈົ້ານັ້ນຈະເພິ່ງລະຖິ້ມມິດທີ່ຊື່ກາລະກັນນີເຊິ່ງສະໜິດສະໜົມກັນມາດົນ
ຍ້ອນເຫດແຫ່ງຄວາມສຸກສ່ວນຕົວໄດ້ຈັ່ງໃດ

**ກາລະກັນນີຊາດົກທີ ໖ ຈົບ**

# ໔. ອັດຖັດສະທະວາຣະຊາດົກ (໗໔)
## ວ່າດ້ວຍຊ່ອງທາງແຫ່ງປະໂຫຍດ

(ເສດຖີໂພທິສັດແກ້ບັນຫາຂອງລູກຊາຍຖາມເຖິງຊ່ອງທາງແຫ່ງປະໂຫຍດວ່າ)

[໗໔] ບຸກຄົນຄວນປາຖະໜາລາບຢ່າງຍິ່ງ ຄື
(໑) ຄວາມບໍ່ມີໂຣກ (໒) ສິນ
(໓) ການໄປຕາມຄວາມຮູ້ຂອງທ່ານຜູ້ສະຫຼາດ (໔) ການສະດັບຮັບຟັງ
(໕) ການປະພຶດສົມຄວນແກ່ທຳ (໖) ຄວາມທີ່ຈິດບໍ່ທໍ້ຖອຍ
ຄຸນນະທຳ ໖ ປະການນີ້ເປັນຊ່ອງທາງຫຼັກແຫ່ງປະໂຫຍດ

**ອັດຖັດສະທະວາຣະຊາດົກທີ ໔ ຈົບ**

# ໕. ກິງປັກກະຊາດົກ (໗໕)
## ວ່າດ້ວຍການປຽບເໝືອນໝາກໄມ້ມີພິດຊື່ກິງປັກກະ

(ພຣະສາດສະດາຕັດປຽບການບໍຣິໂພກກາມມະຄຸນເໝືອນການບໍຣິໂພກໝາກໄມ້ມີພິດແກ່ ກຸນລະບຸດຜູ້ບວດຖວາຍຊີວິດວ່າ)

[໗໕] ບຸກຄົນໃດບໍ່ຮູ້ຈັກໂທດໃນອະນາຄົດແລ້ວມົວແຕ່ເສບກາມຢູ່
ໃນທີ່ສຸດ ການທັງຫຼາຍໃນເວລາໃຫ້ຜົນຍ່ອມກຳຈັດບຸກຄົນນັ້ນ
ເຊັ່ນດຽວກັບໝາກໄມ້ມີພິດຊື່ກິງປັກກະກຳຈັດຜູ້ບໍຣິໂພກ

**ກິງປັກກະຊາດົກທີ ໕ ຈົບ**

## ໖. ສີນະວີມັງສະກະຊາດົກ (໗໖)

## ວ່າດ້ວຍການພິຈາລະນາອານິສົງຂອງສີນ

(ພຣະໂພທິສັດຕັ້ງສະເຫວີຍພຣະຊາດເປັນປຸໂຣຫິດຂອງພຣະເຈົ້າພົມມະທັດ ສັນເສີນສີນວ່າ)

[໗໖] ໄດ້ຍິນວ່າ ສີນເປັນສິ່ງທີ່ດີງາມ
ສີນເປັນສິ່ງທີ່ປະເສີດໃນໂລກ
ເບິ່ງເທີ້ນ ນາກທີ່ມີພິດຮ້າຍແຮງຍັງບໍ່ບຽດບຽນໃຜ
ເພາະສໍານຶກຢູ່ວ່າ ຕົນມີສີນ

**ສີລະວີມັງສະກະຊາດົກທີ ໖ ຈົບ**

## ໗. ມັງຄະລະຊາດົກ (໗໗)

## ວ່າດ້ວຍການຖອນມຸງຄຸນ

(ພຣະສາດສະດາຊົງສະແດງທໍາແກ່ພາມວ່າ)

[໗໗] ຜູ້ໃດຖອນທິດຖິເລື້ອງມຸງຄຸນ
ອຸບາດ ຄວາມຝັນແລະລັກສະນະໄດ້ແລ້ວ
ຜູ້ນັ້ນລ່ວງພົ້ນ
ສິ່ງອັນເປັນມຸງຄຸນແລະໂທດທັງປວງ
ຄອບງໍາກິເລດເປັນຄູ່ ໆ ແລະໂຍຄະທັງ ໔ ປະການໄດ້ແລ້ວ
ບໍ່ກັບມາເກີດອີກ

**ມັງຄະລະຊາດົກທີ ໗ ຈົບ**

## ໘. ສາຣໍາພະຊາດົກ (໗໘)

## ວ່າດ້ວຍງົວຊື່ສາຣໍາພະ

(ພຣະສາດສະດາຕັດສາຣໍາພະຊາດົກແລ້ວ ຈຶ່ງຕັດພຣະຄາຖານີ້ວ່າ)

[໗໘] ບຸກຄົນຄວນເວົ້າຄໍາທີ່ດີງາມທໍ່ນັ້ນ
ບໍ່ຄວນເວົ້າຄໍາທີ່ຊົ່ວຫຍາບເລີຍ
ການເວົ້າຄໍາທີ່ດີງາມເປັນການດີ

ບຸກຄົນຍ່ອມເດືອດຮ້ອນເພາະເວົ້າຄໍາຊົ່ວຫຍາບ

**ສາຣໍາພະຊາດົກທີ ໗ ຈົບ**

## ໘. ກຸຫະກະຊາດົກ (໗໘)
## ວ່າດ້ວຍດາບົດຂີ້ຕົວະ

(ພຣະໂພທິສັດຕິຕຽນດາບົດຕົວະວ່າ)

[໗໘] ຄໍາເວົ້າຂອງທ່ານຊ່າງມ່ວນອ່ອນຫວານແທ້ນໍ
ທ່ານຮັງກຽດຈົນວ່າຫຍ້າເສັ້ນດຽວ
ແຕ່ເມື່ອລັກເອົາຄໍາໄປຕັ້ງ ໑໐໐ ແທ່ງ ກັບບໍ່ຮັງກຽດເລີຍ

**ກຸຫະກະຊາດົກທີ ໘ ຈົບ**

## ໑໐. ອະກະຕັນຍູຊາດົກ (໘໐)
## ວ່າດ້ວຍຄົນອະກະຕັນຍູ

(ເສດຖີໂພທິສັດສະແດງທໍາແກ່ບໍລິສັດວ່າ)

[໘໐] ຜູ້ໃດບໍ່ຮູ້ຈັກທານຄວາມດີແລະປະໂຫຍດທີ່ຜູ້ອື່ນເຮັດໄວ້ກ່ອນ
ຜູ້ນັ້ນເມື່ອກິດຈະວຽກງານເກີດຂຶ້ນໃນພາຍຫຼັງຍ່ອມຫາຜູ້ຊ່ອຍເຫຼືອບໍ່ໄດ້

**ອະກະຕັນຍຸຊາດົກທີ ໑໐ ຈົບ**

**ອະປາຍິມຫະວັກທີ ໘ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

# ໑໐. ລົດຕະວັກ

## ໝວດວ່າດ້ວຍໝາກສະກາເຄືອບຢາພິດ

## ໑. ລິດຕະຊາດົກ (໗໑)

## ວ່າດ້ວຍໝາກສະກາເຄືອບຢາພິດ

(ນັກສະກາໂພທິສັດເຕືອນນັກເລງສະກາຂີ້ໂກງວ່າ)

[໗໑] ບຸຣຸດກືນໝາກສະກາທີ່ເຄືອບຢາພິດຢ່າງແຮງກ້າກໍຍັງບໍ່ຮູ້ໂຕ
ເຮີຍ ເຈົ້ານັກເລງຊົ່ວ ເຈົ້າຈົ່ງກືນເຂົ້າໄປ
ພິດຮ້າຍແຮງຈັກອອກລິດແກ່ເຈົ້າໃນພາຍຫຼັງ

**ລິດຕະຊາດົກທີ ໑ ຈົບ**

## ໘. ມະຫາສາຣະຊາດົກ (໗໘)

## ວ່າດ້ວຍຕ້ອງການຄົນທີ່ເໝາະສົມກັບເຫດການ

(ພຣະຣາຊາຊົງຊົມເຊີຍພຣະໂພທິສັດຜູ້ເປັນອຳມາດວ່າ)

[໗໘] ເມື່ອເຖິງຍາມຄັບຂັນປະຊາຊົນຕ້ອງການຜູ້ກ້າຫານ
ເມື່ອເຖິງເວລາປຶກສາງານຕ້ອງການຜູ້ທີ່ບໍ່ເວົ້າໂລເລ
ຍາມມີເຂົ້ານໍ້າຕ້ອງການຜູ້ເປັນທີ່ຮັກ
ຍາມເກີດບັນຫາຕ້ອງການບັນດິດ

**ມະຫາສາຣະຊາດົກທີ ໘ ຈົບ**

## ໙. ວິດສາສະໂພຊະນະຊາດົກ (໗໙)

## ວ່າດ້ວຍໄພເກີດຈາກຄົນຜູ້ຄຸ້ນເຄີຍກັນ

(ເສດຖີໂພທິສັດສະແດງທຳແກ່ບໍລິສັດວ່າ)

[໗໙] ບຸກຄົນບໍ່ຄວນໄວ້ວາງໃຈໃນບຸກຄົນທີ່ບໍ່ຄຸ້ນເຄີຍກັນ
ແມ່ນໃນບຸກຄົນທີ່ຄຸ້ນເຄີຍກັນກໍບໍ່ເພິ່ງໄວ້ວາງໃຈ
ໄພຍ່ອມມີມາຈາກບຸກຄົນຜູ້ຄຸ້ນເຄີຍກັນ
ເໝືອນໄພຈາກແມ່ເນື້ອມາເຖິງສີຫະ

**ວິດສາສະໂພຊະນະຊາດົກທີ ໙ ຈົບ**

## ໔. ໂລມະຫັງສະຊາດົກ (໗໔)
## ວ່າດ້ວຍການຢູ່ໃນປ່າທີ່ເປັນຕາຢ້ານ

(ຄາຖານີ້ໄດ້ຜາກົດແຈ້ງແກ່ນັກບວດຊີເປືອຍໂພທິສັດວ່າ)

[໗໔] ເຮົາຮ້ອນຮົນແລ້ວປຽກຊຸ່ມຢູ່ໃນປ່າອັນເປັນຕາຢ້ານຜູ້ດຽວ
ເປືອຍກາຍບໍ່ໄດ້ຜິງໄຟ ເປັນມຸນີຂວນຂວາຍໃນການສະແຫວງຫາພົມມະຈັນ

**ໂລມະຫັງສະຊາດົກທີ ໔ ຈົບ**

## ໕. ມະຫາສຸທັດສະນະຊາດົກ (໗໕)
## ວ່າດ້ວຍພຣະເຈົ້າມະຫາສຸທັດສະນະ

(ພຣະຣາຊາໂພທິສັດ ຊົງພະນາມວ່າມະຫາສຸທັດສະນະ ເມື່ອຈະສອນສຸພັດທາເທວີ ຈຶ່ງຕັດຄາຖານີ້ວ່າ)

[໗໕] ສັງຂານທັງຫຼາຍບໍ່ທ່ຽງນໍ
ມີຄວາມເກີດຂຶ້ນແລະເສື່ອມໄປເປັນທຳມະດາ
ເມື່ອເກີດຂຶ້ນແລ້ວກໍດັບໄປ
ການເຂົ້າໄປສະງົບຣະງັບສັງຂານເຫຼົ່ານັ້ນເປັນຄວາມສຸກ

**ມະຫາສຸທັດສະນະຊາດົກທີ ໕ ຈົບ**

## ໖. ເຕລະປັດຕະຊາດົກ (໗໖)
## ວ່າດ້ວຍການຮັກສາຈິດເໝືອນການຮັກສາພາຊະນະນ້ຳມັນ

(ພຣະສາດສະດາຊົງປະມວນເລື້ອງໃນອະດີດມາສາທົກ ຕັດພຣະຄາຖານີ້ວ່າ)

[໗໖] ບຸກຄົນເມື່ອປາຖະໜາຈະໄປສູ່ທິດທາງທີ່ຍັງບໍ່ເຄີຍໄປ
ເພິ່ງຕາມຮັກສາຈິດຂອງຕົນດ້ວຍສະຕິ
ເໝືອນບຸກຄົນປະຄັບປະຄອງພາຊະນະ
ທີ່ມີນ້ຳມັນເຕັມບໍ່ໃຫ້ເພືອດ

**ເຕລະປັດຕະຊາດົກທີ ໖ ຈົບ**

## ໗. ນາມະສິດທິຊາດົກ (໕໗)
## ວ່າດ້ວຍຊື່ບໍ່ເປັນຂອງສຳຄັນ

(ອາຈານທິສາປາໂມກໂພທິສັດປຽບທຽບເລື້ອງທີ່ນາຍປາປະກະຜູ້ເປັນສິດຕ້ອງການ ປ່ຽນຊື່ເພາະເປັນອັບປະມຸງຄຸນທີ່ເຂົາເຫັນມາແລະກຳທີ່ເຂົາເຮັດ ຈຶ່ງກ່າວຄາຖານີ້ວ່າ)

[໕໗] ເພາະເຫັນຄົນຊື່ເປັນໄດ້ຕາຍໄປ ຍິງຊື່ມີຊັບກັບຕົກຍາກ
ແລະຄົນຊື່ວ່ານັກເດີນທາງແຕ່ກັບຫຼົງທາງຢູ່ໃນປ່າ
ນາຍປາປະກະຈຶ່ງໄດ້ກັບມາ

**ນາມະສິດທິຊາດົກທີ ໗ ຈົບ**

## ໘. ກູຕະວານິດຊາດົກ (໕໘)
## ວ່າດ້ວຍພໍ່ຄ້າໂກງຖືກໄຟຄອບ

(ບິດາຂອງອະຕິບັນດິດຖືກໄຟໄໝ້ຈຶ່ງເຮັດເກ່ງຂຶ້ນທາງເທິງ ຈັບງ່າໄມ້ຈ່ອງແລ້ວໂດດລົງດິນພ້ອມກ່າວວ່າ)

[໕໘] ທຳມະດາບັນດິດ (ຄົນສະຫຼາດ) ເປັນຄົນດີ
ສ່ວນຄົນຊື່ອະຕິບັນດິດ (ແສນສະຫຼາດ) ແຕ່ບໍ່ດີເລີຍ
ເຮົາຖືກໄຟລວກບໍ່ຫຼາຍ ເພາະບຸດຂອງເຮົາທີ່ຊື່ອະຕິບັນດິດ

**ກູຕະວານິດຊາດົກທີ ໘ ຈົບ**

## ໙. ປະໂຣສະຫັດສະຊາດົກ (໕໙)
## ວ່າດ້ວຍຄົນມີປັນຍາຄົນດຽວປະເສີດກວ່າຄົນໂງ່ຕັ້ງ ໑,໐໐໐

(ລືສີໂພທິສັດຮູ້ເຫດທີ່ພວກອັນທະພານບໍ່ເຊື່ອສິດຫົວໜ້າ ຈຶ່ງກ່າວບັນລະຍາຍອານຸພາບຂອງຕົນວ່າ)

[໕໙] ບັນດາພວກທີ່ມາປະຊຸມກັນ ໑,໐໐໐ ກວ່າຄົນ
ພວກເຂົາເປັນຄົນບໍ່ມີປັນຍາ ເພິ່ງຄ່ຳຄວນຕະຫຼອດ ໑໐໐ ປີ
ຄົນມີປັນຍາຮູ້ແຈ້ງເນື້ອຄວາມທີ່ເຮົາກ່າວແລ້ວ
ພຽງຄົນດຽວທີ່ນັ້ນຍັງປະເສີດກວ່າ

**ປະໂຣສະຫັດສະຊາດົກທີ ໙ ຈົບ**

## ໑໐. ອະສາຕະຣູປະຊາດົກ (໑໐໐)
### ວ່າດ້ວຍສິ່ງທີ່ຄອບງຳຄົນຂາດສະຕິ

(ພຣະສາດສະດາຊົງປະນອນເລື້ອງໃນອະດີດມາ ຕັດພຣະຄາຖານີ້ວ່າ)

[໑໐໐] ສິ່ງທີ່ບໍ່ໜ້າຍິນດີຍ່ອມຄອບງຳຄົນຜະໝາດດ້ວຍອາການທີ່ໜ້າຍິນດີ
ສິ່ງທີ່ບໍ່ໜ້າຮັກຍ່ອມຄອບງຳຄົນຜະໝາດດ້ວຍອາການທີ່ໜ້າຮັກ
ສິ່ງທີ່ເປັນທຸກຍ່ອມຄອບງຳຄົນທີ່ຜະໝາດດ້ວຍອາການແຫ່ງຄວາມສຸກ

**ອະສາຕະຣູປະຊາດົກທີ ໑໐ ຈົບ**

**ລິດຕະວັກທີ ໑໐ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ລິດຕະຊາດົກ
໒. ວິດສາສະໂພຊະນະຊາດົກ
໓. ມະຫາສຸທັດສະນະຊາດົກ
໔. ນາມະສິດທິຊາດົກ
໕. ປະໂຣສະຫັດສະຊາດົກ
໖. ມະຫາສາຣະຊາດົກ
໗. ໂລມະຫັງສະຊາດົກ
໘. ເຕລະປັດຕະຊາດົກ
໙. ກູຕະວານິດຊາດົກ
໑໐. ອະສາຕະຣູປະຊາດົກ

**ມັດຊິມະປັນນາດ ຈົບ**

# ໑໑. ປະໂຣສະຕະວັກ
## ໝວດວ່າດ້ວຍຄົນເກີນຮ້ອຍ
## ໑. ປະໂຣສະຕະຊາດົກ (໑໐໑)
### ວ່າດ້ວຍຄົນມີປັນຍາຄົນດຽວປະເສີດກວ່າຄົນບໍ່ມີປັນຍາ ໑໐໐ ກວ່າຄົນ

(ພຣະສາດສະດາຊົງປະນອນເລື້ອງໃນອະດີດມາ ຕັດພຣະຄາຖານີ້ວ່າ)

[໑໐໑] ບັນດາພວກທີ່ມາປະຊຸມກັນ ໑໐໐ ກວ່າຄົນ
ຄົນມີປັນຍາຮູ້ແຈ້ງເນື້ອຄວາມທີ່ເຮົາກ່າວແລ້ວ
ພຽງຄົນດຽວທີ່ນັ້ນປະເສີດກວ່າ

**ປະໂຣສະຕະຊາດົກທີ ໑ ຈົບ**

## ໘. ປັນນິກະຊາດົກ (໑໐໘)
## ວ່າດ້ວຍອຸປາສົກຊື່ປັນນິກະ

(ລູກສາວຂອງອຸປາສົກຊາວເມືອງພາຣານະສີພໍຖືກບິດາຈັບມືເພື່ອລອງໃຈກໍຮ້ອງໄຫ້ ພ້ອມກ່າວວ່າ)

[໑໐໘] ຍາມເມື່ອເຮົາມີຄວາມທຸກ
ຄົນທີ່ເປັນບ່ອນເພິ່ງຄືບິດາຂອງເຮົາເອງ
ແຕ່ກັບປະທຸດສະຮ້າຍເຮົາໃນປ່າ
ເຮົາຈະຄ່ຳຄວນຫາໃຜນໍໃນທ່າມກາງປ່າ
ຄົນທີ່ຈະຊ່ອຍເຫຼືອເຮົາກັບເຮັດກັບເຮົາເອງ
ໄດ້ຢ່າງໜ້າອາຍ

**ປັນນິກະຊາດົກທີ ໘ ຈົບ**

## ໙. ເວຣິຊາດົກ (໑໐໙)
## ວ່າດ້ວຍການຢູ່ຮ່ວມກັບຄົນເປັນຄູ່ເວນກັນເປັນທຸກ

(ມະຫາເສດຖີໂພທິສັດໜີພວກໂຈນໄດ້ຢ່າງປອດໄພ ຈຶ່ງກ່າວອຸທານວ່າ)

[໑໐໙] ບັນດິດບໍ່ຄວນຢູ່ໃນສະຖານທີ່ທີ່ມີຄູ່ເວນກັນຢູ່
ເພາະບຸກຄົນເມື່ອຢູ່ໃນລະຫວ່າງຄົນເປັນຄູ່ເວນກັນ
ຄືນໜຶ່ງຫຼືສອງຄືນກໍຕາມຍ່ອມຢູ່ເປັນທຸກ

**ເວຣິຊາດົກທີ ໙ ຈົບ**

## ໑໐. ມິດຕະວິນທະກະຊາດົກ (໑໑໐)
## ວ່າດ້ວຍນາຍມິດຕະວິນທະກະຕົກນະຮົກຍ້ອນຄວາມໂລບ

(ພຣະໂພທິສັດເຫັນນາຍມິດຕະວິນທະຕົກນະຮົກ ຈຶ່ງກ່າວພຣະຄາຖານີ້ວ່າ)

[໑໑໐] ທ່ານເມື່ອມີຄວາມປາຖະໜາຫຼາຍເກີນໄປ
ໄດ້ຄອບຄອງນາຣີ ໔ ນາງ ບໍ່ພໍໃຈນາງທັງ ໔
ໄດ້ຄອບຄອງນາຣີ ໘ ນາງ ບໍ່ພໍໃຈນາງທັງ ໘

ໄດ້ຄອບຄອງນາຣີ ໑໖ ນາງ ບໍ່ພໍໃຈນາງທັງ ໑໖
ໄດ້ຄອບຄອງນາຣີ ໓໔ ນາງ ບໍ່ພໍໃຈນາງທັງ ໓໔
ຈຶ່ງໄດ້ປະສົບຄວາມເດືອດຮ້ອນ
ຄວາມຮ້ອນຮົນຍ່ອມທຳລາຍຄວາມສຸກຂອງ
ຜູ້ຖືກຄວາມປາຖະໜາຫຼາຍເກີນໄປກຳຈັດແລ້ວ

**ມິດຕະ ວິນທະກະຊາດົກທີ ໔ ຈົບ**

## ໕. ທຸບພະລະກັດຖະຊາດົກ (໑໐໕)
## ວ່າດ້ວຍຊ້າງຢ້ານຕົ້ນໄມ້ແຫ້ງ

(ຮຸກຂະເທວະດາໂພທິສັດເຫັນຊ້າງຢ້ານຕາຍໄດ້ຍິນສຽງລົມພັດໃບໄມ້ແຫ້ງກໍແລ່ນໜີ ຈຶ່ງກ່າວວ່າ)

[໑໐໕] ລົມພັດຕົ້ນໄມ້ແຫ້ງທີ່ປົ່ວໃນປ່າໃຫ້ຫັກລົງເປັນຈຳນວນຫຼາຍ
ນີ້ຊ້າງ ຖ້າທ່ານຍັງເອົາແຕ່ຢ້ານຕົ້ນໄມ້ແຫ້ງນັ້ນ
ກໍຈັກຈ່ອຍແຫ້ງລົງຢ່າງແນ່ນອນ

**ທຸບພະລະກັດຖະຊາດົກທີ ໕ ຈົບ**

## ໖. ອຸທັນຈະນີຊາດົກ (໑໐໖)
## ວ່າດ້ວຍນາງອຸທັນຈະນີ

(ດາບົດຜູ້ເປັນບຸດຂອງພຣະໂພທິສັດອົດທົນຕໍ່ການຄຸ່ງວເຂັນຂອງນາງອຸທັນຈະນີບໍ່ໄຫວໜີໄປຫາບິດາແລ້ວ ຈຶ່ງກ່າວວ່າ)

[໑໐໖] ນາງໂຈນຊື່ອຸທັນຈະນີບຽດບຽນລູກ
ຜູ້ຢູ່ຢ່າງສະບາຍໃຫ້ເດືອດຮ້ອນ
ເພາະຮຽກຕົນເອງວ່າເປັນພັນລະຍາຈຶ່ງຮ້ອງຂໍນ້ຳມັນແລະເກືອ

**ອຸທັນຈະນີຊາດົກທີ ໖ ຈົບ**

## ໗. ສາລິດຕະກະຊາດົກ (໑໐໗)
## ວ່າດ້ວຍສິລະປະໃນການດີດກ້ອນຫີນ

(ອຳມາດໂພທິສັດເຂົ້າໄປເຝົ້າພຣະຣາຊາຂາບທູນລາໄປຮຽນສິລະປະວ່າ)

[໑໐໗] ຂຶ້ນຊື່ວ່າສິລະປະແມ່ນຊະນິດໃດຊະນິດໜຶ່ງ
ກໍສາມາດເຮັດໃຫ້ສຳເລັດປະໂຫຍດໄດ້
ຂໍພຣະອົງຊົງທອດພຣະເນດໝູ່ບ້ານໃນທິດທັງ ໔
ທີ່ຄົນງ່ອຍໄດ້ແລ້ວຍ້ອນການດີດມູນແບ້

**ສາລິດຕະກະຊາດົກທີ ໗ ຈົບ**

## ໘. ພາຫິຍະຊາດົກ (໑໐໘)
## ວ່າດ້ວຍສິລະປະຂອງຍິງສາວບ້ານນອກ

(ພຣະໂພທິສັດຂາບທູນຄຸນຄ່າແຫ່ງສິລະປະທີ່ຄວນສຶກສາວ່າ)

[໑໐໘] ບຸກຄົນຄວນສຶກສາສິລະປະທັງຫຼາຍທີ່ຄວນສຶກສາ
ຊົນທັງຫຼາຍທີ່ພໍໃຈໃນສິລະປະເຫຼົ່ານັ້ນຍັງມີຢູ່
ເພາະວ່າຍິງສາວບ້ານນອກກໍຍັງເຮັດພຣະຣາຊາໃຫ້ພໍພຣະຫະໄທໄດ້
ດ້ວຍຄວາມອຽງອາຍຂອງນາງ

**ພາຫິຍະຊາດົກທີ ໘ ຈົບ**

## ໙. ກຸນທະປູວະຊາດົກ (໑໐໙)
## ວ່າດ້ວຍເທວະດາກິນການບູຊາທີ່ເຮັດຈາກຮຳເຂົ້າ

(ເທວະດາໂພທິສັດສະຖິດເໜືອຄ່າຄົບໄມ້ເວົ້າກັບຄົນທຸກຍາກຄົນໜຶ່ງຜູ້ມາບູຊາວ່າ)

[໑໐໙] ຄົນບໍຣິໂພກແນວໃດ
ເທວະດາຂອງເຂົາກໍບໍຣິໂພກແນວນັ້ນ
ທ່ານຈົ່ງນຳເຂົ້າໜົມທີ່ເຮັດດ້ວຍຮຳເຂົ້າມາ
ຢ່າໃຫ້ສ່ວນຂອງຂ້າພະເຈົ້າເສຍຫາຍເລີຍ

**ກຸນທະປູວະຊາດົກທີ ໙ ຈົບ**

## ໑໐. ສັບພະສັງຫາຣະກະປັນຫະຊາດົກ (໑໑໐)
## ວ່າດ້ວຍການເວົ້າຂອງຍິງ ໘ ປະເພດ

(ພຣະໂພທິສັດຂັດສີເຄື່ອງປະດັບຢູ່ເມື່ອຮູ້ວ່າດອກປະຍົງບານແລ້ວ ຈຶ່ງກ່າວວ່າ)

[໑໑໐] ກິ່ນເຄື່ອງອົບທັງປວງບໍ່ມີ
ມີແຕ່ກິ່ນດອກປະຍົງລ້ວນ ໆ ຟຸ້ງໄປ
ຍິງນັກເລງຄົນນີ້ເວົ້າແຕ່ຄຳເຫຼາະແລ
ສ່ວນຍິງຜູ້ໃຫຍ່ເວົ້າແຕ່ຄຳສັດ

**ສັບພະສັງຫາຣະກະປັນຫະຊາດົກທີ ໑໐ ຈົບ**

**ປະໂຣສະຕະວັກທີ ໑໑ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ປະໂຣສະຕະຊາດົກ
໒. ເວຣິຊາດົກ
໓. ທຸບພະລະກັດຖະຊາດົກ
໗. ສາລິດຕະກະຊາດົກ
໙. ກຸນທະປູວະຊາດົກ
໔. ປັນນິກະຊາດົກ
໕. ມິດຕະວິນທະກະຊາດົກ
໖. ອຸທັນຈະນີຊາດົກ
໘. ພາຫິຍະຊາດົກ
໑໐. ສັບພະສັງຫາຣະກະປັນຫະຊາດົກ

# ໑໔. ຫັງສິວັກ

## ໝວດວ່າດ້ວຍການເຍີ້ຍຫຍັນ

## ໑. ຄັດທະຣະພະປັນຫະຊາດົກ (໑໑໑)
## ວ່າດ້ວຍບັນຫາເລື້ອງລາກັບມ້າອັດສະດອນ

(ພຣະໂພທິສັດມະໂຫສົດບັນດິດຂາບທູນພຣະຣາຊາວ່າ)

[໑໑໑] ຂໍເດຊະ ພຣະມະຫາຣາດຜູ້ປະເສີດ
ຖ້າພຣະອົງຊົງສຳຄັນວ່າບິດາປະເສີດກວ່າບຸດ
ລາຕົວນີ້ກໍປະເສີດກວ່າມ້າອັດສະດອນ
ເພາະວ່າ ລາເຄີຍເປັນພໍ່ມ້າອັດສະດອນຂອງພຣະອົງ

**ຄັດທະຣະພະປັນຫະຊາດົກທີ ໑ ຈົບ**

# ໘. ອະມະຣາເທວີປັນຫະຊາດົກ (໑໑໘)
## ວ່າດ້ວຍພຣະນາງອະມະຣາເທວີ

(ພຣະນາງອະມະຣາເທວີບອກໃບ້ທາງໄປບ້ານແກ່ພຣະໂພທິສັດມະໂຫສົດບັນດິດວ່າ)

[໑໑໘] ຮ້ານຂາຍເຂົ້າ ຮ້ານຂາຍນ້ຳສົ້ມສາຍຊູ
ແລະຕົ້ນດອກຈານໃບຊ້ອນທີ່ມີດອກບານດາດາດມີຢູ່ໃນບ່ອນໃດ
ທ່ານຈົ່ງໄປ ໃນບ່ອນນັ້ນ
ຂ້ານ້ອຍຖືພາຊະນະເຂົ້າຍາຄູດ້ວຍມືໃດ ຂ້ານ້ອຍບອກທາງດ້ວຍມືນັ້ນ
ບໍ່ໄດ້ຖືພາຊະນະເຂົ້າຍາຄູດ້ວຍມືໃດ ບໍ່ໄດ້ບອກທາງດ້ວຍມືນັ້ນ
ຫົນທາງນັ້ນເປັນຫົນທາງໄປສູ່ບ້ານຂອງຂ້ານ້ອຍ
ເຊິ່ງຕັ້ງຢູ່ໃນບ້ານອຸດຕະຣະ ຍະວະມັດຊະຄາມະ
ຂໍທ່ານຈົ່ງຮູ້ຫົນທາງທີ່ຂ້ານ້ອຍກ່າວເປັນ ປິດສະໜານັ້ນເອງເທີ້ນ

**ອະມະຣາເທວີປັນຫະຊາດົກທີ ໘ ຈົບ**

# ໙. ສິງຄາລະຊາດົກ (໑໑໙)
## ວ່າດ້ວຍພາມເຊື້ອໝາຈອກ

(ຣຸກຂະເທວະດາໂພທິສັດຢືນຢູ່ທີ່ຄ່າຄົບຕົ້ນໄມ້ແລ້ວກ່າວວ່າ)

[໑໑໙] ນີ້ພໍ່ພາມ ທ່ານເຊື້ອໝາຈອກທີ່ດື່ມສຸຣາບໍ?
ຄົນມີສິລະປະຫາຈັກ ໑໐໐ ກະຫາປະນະຍັງບໍ່ໄດ້
ແລ້ວໝາຈອກມາແຕ່ໃສຈະມີຮອດ ໘໐໐ ກະຫາປະນະບໍ?

**ສິງຄາລະຊາດົກທີ ໙ ຈົບ**

# ໑໐. ມິດະຈິນຕິຊາດົກ (໑໑໔)
## ວ່າດ້ວຍປາມິດະຈິນຕິຊ່ອຍປາໃຫ້ພົ້ນມອງ

(ພຣະສາດສະດາຊົງປະມວນເລື້ອງອະດີດມາ ຕັດພຣະຄາຖານີ້ວ່າ)

[໑໑໔] ປາຊື່ພະຫຸຈິນຕິແລະປາຊື່ອັບປະຈິນຕິ
ທັງ ໒ ໂຕຕິດຢູ່ໃນມອງ

ປາຊື່ມິດະຈິນຕີໄດ້ຊ່ອຍໃຫ້ຫຼຸດພົ້ນຈາກມອງ
ປາທັງ ໔ ໂຕຈຶ່ງໄດ້ມາພ້ອມກັນກັບປາມິດະຈິນຕີໃນນ່ານນ້ຳນັ້ນ

**ມິດະຈິນຕິຊາດົກທີ ໔ ຈົບ**

## ໕. ອະນຸສາສິກະຊາດົກ (໑໑໕)
## ວ່າດ້ວຍດີແຕ່ສອນຄົນອື່ນ

(ຫົວໜ້າ ນົກໂພທິສັດກ່າວຕຳໜິນາງນົກປ່າວ່າ)

[໑໑໕] ນາງນົກປ່າຊື່ອະນຸສາສິກາ
ພ່ຳສອນນົກເຫຼົ່າອື່ນຢູ່ເນືອງນິດ
ແຕ່ຕົນເອງຍັງເປັນຜູ້ໂລບຫຼາຍຢູ່
ຈຶ່ງຖືກລໍ້ລົດຢຽບຈົນຂາດເປັນ ໔ ທ່ອນນອນຢູ່ກາງທາງໃຫຍ່

**ອະນຸສາສິກະຊາດົກທີ ໕ ຈົບ**

## ໖. ທຸບພະຈະຊາດົກ (໑໑໖)
## ວ່າດ້ວຍຄົນທີ່ວ່າກ່າວໄດ້ຍາກ

(ນັກຣະບຳໂພທິສັດກ່າວກັບອາຈານຜູ້ບໍ່ເຊື່ອຄຳຂອງບັນດິດວ່າ)

[໑໑໖] ທ່ານອາຈານ ທ່ານທຳການເກີນກວ່າທີ່ຈະເຮັດໄດ້
ການທຳນັ້ນບໍ່ເປັນທີ່ພໍໃຈຂອງເຮົາເລີຍ
ທ່ານໂດດຂ້າມພົ້ນຫອກເຫຼັ້ມທີ ໔ ໄດ້ແລ້ວ
ຖືກຫອກເຫຼັ້ມທີ ໕ ທີ່ມແທງ

**ທຸບພະຈະຊາດົກທີ ໖ ຈົບ**

## ໗. ຕິດຕິຣະຊາດົກ (໑໑໗)
## ວ່າດ້ວຍນົກກະທາ

(ດາບົດໂພທິສັດຊີ້ເຫດ ໔ ປະການທີ່ເຮັດໃຫ້ນົກກະທາຖືກຂ້າວ່າ)

[໑໑໗] ຄຳເວົ້າທີ່ດັງເກີນໄປ ຮຸນແຮງເກີນໄປ ແລະເວົ້າເກີນເວລາ

ຍ່ອມຂ້າຄົນມີປັນຍາຊາມ
ເໝືອນສຽງຂ້ານົກກະທາທີ່ຂັນດັງເກີນໄປ

**ຕິດຕີຣະຊາດົກທີ ໗ ຈົບ**

## ๘. ວັດຕະກະຊາດົກ (๑๑๘)
## ວ່າດ້ວຍນົກກະຈາບ

(ນົກກະຈາບໂພທິສັດບອກອຸບາຍທີ່ລອດຊີວິດມາໄດ້ວ່າ)

[๑๑๘] ຄົນເມື່ອບໍ່ຄິດກໍບໍ່ໄດ້ບັນລຸຄຸນທໍາວິເສດ
ທ່ານຈົ່ງເບິ່ງຜົນກໍາທີ່ເຮົາຄິດແລ້ວ
ເຮົາພົ້ນແລ້ວຈາກການຖືກຂ້າ
ແລະການຈອງຈໍາດ້ວຍອຸບາຍນັ້ນ

**ວັດຕະກະຊາດົກທີ ๘ ຈົບ**

## ๙. ອະກາລະຣາວີຊາດົກ (๑๑๙)
## ວ່າດ້ວຍໄກ່ທີ່ຂັນບໍ່ຖືກເວລາ

(ປຸໂຣຫິດໂພທິສັດຂາບທູນພຣະຣາຊາວ່າ)

[๑๑๙] ໄກ່ໂຕນີ້ບໍ່ໄດ້ຈະເລີນເຕີບໃຫຍ່ຢູ່ກັບພໍ່ແມ່
ບໍ່ໄດ້ຢູ່ສຶກສາໃນສໍານັກຂອງອາຈານ
ຈຶ່ງບໍ່ຮູ້ເວລາທີ່ຄວນຂັນແລະບໍ່ຄວນຂັນ

**ອະກາລະຣາວີຊາດົກທີ ๙ ຈົບ**

## ๑๐. ພັນທະນະໂມກຂະຊາດົກ (๑๒๐)
## ວ່າດ້ວຍການຫຼຸດພົ້ນຈາກເຄື່ອງຈອງຈໍາ

(ປຸໂຣຫິດໂພທິສັດຂາບທູນພຣະຣາຊາວ່າ)

[๑๒๐] ສະຖານທີ່ທີ່ຄົນພານເອີ່ຍປາກຂຶ້ນ
ຄົນທີ່ບໍ່ຄວນຖືກຈອງຈໍາກໍຖືກຈອງຈໍາ

ສະຖານທີ່ທີ່ນັກປາດເອີ່ຍປາກຂຶ້ນ
ແມ່ນຄົນທີ່ຖືກຈອງຈຳກຳລຸດພົ້ນ

**ພັນທະນະໂມກຂະຊາດົກທີ ໑໐ ຈົບ**

**ທັງສີວັກທີ ໑໘ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື



# ໑໙. ກຸສະນາລິວັກ

## ໝວດວ່າດ້ວຍກໍຫຍ້າ

## ໑. ກຸສະນາລິຊາດົກ (໑໘໑)
## ວ່າດ້ວຍເທວະດາທີ່ຕົ້ນຣຸຈາຜູກມິດກັບເທວະດາທີ່ກໍຫຍ້າ

(ຣຸກຂະເທວະດາສັນເສີນມິດຕະທຳຂອງພຣະໂພທິສັດວ່າ)

[໑໘໑] ບຸກຄົນສະເໝີກັນ ປະເສີດກວ່າກັນ
ຫຼືຊົ່ວກວ່າກັນກໍຕາມ ກໍຄວນສ້າງມິດໄມຕີກັນໄວ້
ເພາະວ່າ ມິດເຫຼົ່ານັ້ນເມື່ອຄວາມເສື່ອມເກີດຂຶ້ນ
ກໍເພິ່ງເຮັດປະໂຫຍດອັນອຸດົມໃຫ້ໄດ້
ເໝືອນເຮົາຜູ້ເປັນເທວະດາສະຖິດຢູ່ທີ່ຕົ້ນຣຸຈາ
ກັບເທວະດາຜູ້ສະຖິດຢູ່ທີ່ກໍຫຍ້າສ້າງມິດໄມຕີກັນ

**ກຸສະນາລິຊາດົກທີ ໑ ຈົບ**

## ໘. ທຸມເມທະຊາດົກ (໑໘໘)

## ວ່າດ້ວຍຄົນມີປັນຍາຊາມ

(ນາຍຄວາມຊ້າງຂາບທູນພຣະຣາຊາວ່າ)

[໑໘໘] ຄົນມີປັນຍາຊາມໄດ້ຍົດແລ້ວ
ປະພຶດສິ່ງທີ່ບໍ່ເປັນປະໂຫຍດແກ່ຕົນເອງ
ປະຕິບັດເພື່ອບຽດບຽນຕົນເອງແລະຜູ້ອື່ນ

**ທຸມເມທະຊາດົກທີ ໘ ຈົບ**

## ໙. ບັງຄະລິສະຊາດົກ (໑໘໙)

## ວ່າດ້ວຍຄົນໂງ່ສຳຄັນນົມສົ້ມວ່າເໝືອນງອນໄຖ

(ອາຈານທິສາປາໂມກຄິດເຖິງເຫດທີ່ບໍ່ອາດໃຫ້ຄົນມີປັນຍາອ່ອນສຶກສາໄດ້ ຈຶ່ງກ່າວວ່າ)

[໑໘໙] ຄົນໂງ່ກ່າວຄຳທີ່ບໍ່ຄວນກ່າວ
ໃນເຫດການທຸກຢ່າງ ໃນທີ່ທຸກສະຖານ
ເຂົາບໍ່ຮູ້ຈັກນົມສົ້ມແລະງອນໄຖ
ສຳຄັນນົມສົ້ມແລະນົມສົດວ່າເໝືອນງອນໄຖ

**ບັງຄະລິສະຊາດົກທີ ໙ ຈົບ**

## ໑໐. ອຳພະຊາດົກ (໑໙໐)

## ວ່າດ້ວຍດາບົດສັນໝາກມ່ວງ

(ລືສີໂພທິສັດໄດ້ເຫັນເຫດທີ່ດາບົດ ໕໐໐ ອາໄສດາບົດຜູ້ສົມບູນດ້ວຍວັດເປັນຢູ່ ຈຶ່ງກ່າວວ່າ)

[໑໙໐] ຄົນສະຫຼາດຄວນພະຍາຍາມຮ່ຳໄປ
ບໍ່ຄວນເບື່ອໜ່າຍ
ທ່ານຈົ່ງເບິ່ງຜົນແຫ່ງຄວາມພະຍາຍາມ
ໝາກໄມ້ມີໝາກມ່ວງເປັນຕົ້ນທີ່ພວກລືສີໄດ້ສັນ
ໂດຍບໍ່ໄດ້ອອກປາກເວົ້າຕະຫຼອດເວລາ

**ອຳພະຊາດົກທີ ໑໐ ຈົບ**

## ໕. ກະຕາທະກະຊາດົກ (໑໘໕)
### ວ່າດ້ວຍທາດຊື່ ກະຕາທະກະ

(ທີດາເສດຖີກ່າວຄາຖານີ້ໂດຍທຳນອງທີ່ຮຽນມາໃນສຳນັກພຣະໂພທິສັດວ່າ)

[໑໘໕] ບຸກຄົນໄປສູ່ຊົນນະບົດອື່ນແລ້ວ
ກ່າວຂົ່ມຂູ່ໂອ້ອວດໄວ້ຫຼາຍ
ເຈົ້າກະຕາທະກະ ນາຍຂອງເຈົ້າຈະຕິດຕາມມາປະທຸດສະຮ້າຍ
ເຈົ້າຈົ່ງໃຊ້ສອຍສົມບັດນີ້ເທີ້ນ

**ກະຕາທະກະຊາດົກທີ ໕ ຈົບ**

## ໖. ອະສິລັກຂະນະຊາດົກ (໑໘໖)
### ວ່າດ້ວຍຜູ້ຮູ້ລັກສະນະດາບ

(ພຣະຣາຊາຊົງພຣະສູວນຕໍ່ພາມ ໄດ້ຕັດບອກເຫດທີ່ພຣະອົງຊົງຈາມແລ້ວໄດ້ພຣະຣາດຊະທິດາ ແລະໄດ້ຣາດຊະສົມບັດວ່າ)

[໑໘໖] ເຫດການຢ່າງດຽວກັນນັ້ນ ນັ້ນເປັນຜົນດີແກ່ຄົນໜຶ່ງ
ແຕ່ກັບເປັນຜົນຮ້າຍແກ່ອີກຄົນໜຶ່ງ
ເພາະສະນັ້ນ ເຫດການຢ່າງດຽວກັນນັ້ນນັ້ນ
ບໍ່ແມ່ນຈະເປັນຜົນດີໄປທັງໝົດ ຫຼືບໍ່ແມ່ນຈະເປັນຜົນຮ້າຍໄປທັງໝົດ

**ອະສິລັກຂະນະຊາດົກທີ ໖ ຈົບ**

## ໗. ກະລັນທຸກະຊາດົກ (໑໘໗)
### ວ່າດ້ວຍຊາດກຳເນີດຂອງນາຍ ກະລັນທຸກະ

(ລູກນົກແຂກເຕົ້າໂພທິສັດກ່າວເຕືອນທາສະກະລັນທຸກະວ່າ)

[໑໘໗] ເຮົາທັງວຢູ່ໃນປ່າຍັງຮູ້ຊາດກຳເນີດຂອງເຈົ້າໄດ້
ນາຍຂອງເຈົ້າຮູ້ແຈ່ມແຈ້ງແລ້ວຕ້ອງຈັບເຈົ້າໄປ
ເຈົ້າ ກະລັນທຸກະ ເຈົ້າຈົ່ງດື່ມນົມສົດສາເທີ້ນ

**ກະລັນທຸກະຊາດົກທີ ໗ ຈົບ**

## ໘. ພິລາຣະວະຕະຊາດົກ (໑໘໘)
## ວ່າດ້ວຍຂໍ້ວັດຂອງແມວ

(ພະຍາໜູໂພທິສັດກ່າວຕຳໜິໝາຈອກວ່າ)

[໑໘໘] ຜູ້ໃດກ່າວເຊີດຊູທຳໃຫ້ເປັນທຸງໄຊ
ລໍ້ລວງໃຫ້ເຫຼົ່າສັດຕາຍໃຈແລ້ວຊ່ອນຕົນປະພຶດຊົ່ວ
ຄວາມປະພຶດຂອງຜູ້ນັ້ນຊື່ວ່າເປັນຄວາມປະພຶດຂອງແມວ

**ພິລາຣະວະຕະຊາດົກທີ ໘ ຈົບ**

## ໙. ອັກຄິກະຊາດົກ (໑໘໙)
## ວ່າດ້ວຍໝາຈອກຊື່ອັກຄິກະ

(ພະຍາໜູໂພທິສັດກ່າວຕິຕຽນໝາຈອກວ່າ)

[໑໘໙] ປ່ອຍຜົມນີ້ບໍ່ໄດ້ມີໄວ້ຍ້ອນເຫດແຫ່ງບຸນ
ມີໄວ້ເພາະເປັນເລດອ້າງເພື່ອການຫາກິນ
ໝູ່ໜູມີບໍ່ຄົບຕາມຈຳນວນຫາງ
ອັກຄິກະ ພໍແລ້ວສຳລັບທ່ານ

**ອັກຄິກະຊາດົກທີ ໙ ຈົບ**

## ໑໐. ໂກສິຍະຊາດົກ (໑໙໐)
## ວ່າດ້ວຍນາງພາມມະນີຊື່ໂກສິຍາ

(ມານົບ ກ່າວເຕືອນນາງພາມມະນີວ່າ)

[໑໙໐] ນີ້ນາງໂກສິຍາ ທ່ານຈົ່ງກິນຍາໃຫ້ສົມກັບທີ່ອ້າງວ່າປ່ວຍ
ແລະຈົ່ງເວົ້າໃຫ້ສົມກັບອາຫານທີ່ກິນເຂົ້າໄປ
ຄຳເວົ້າກັບອາຫານທີ່ທ່ານກິນທັງ ໒ ຢ່າງບໍ່ສົມກັນເລີຍ

**ໂກສິຍະຊາດົກທີ ໑໐ ຈົບ**

**ກຸສະນາລີວັກທີ ໑໙ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ກຸສະນາລີຊາດົກ
໒. ນັງຄະລີສະຊາດົກ
໕. ກະຕາຫະກະຊາດົກ
໗. ກະລັນທຸກະຊາດົກ
໙. ອັກຄິກະຊາດົກ
໘. ທຸມເມທະຊາດົກ
໔. ອຳພະຊາດົກ
໖. ອະສີລັກຂະນະຊາດົກ
໘. ພິລາຣະວະຕະຊາດົກ
໑໐. ໂກສິຍະຊາດົກ

# ໑໔. ອະສຳປະທານະວັກ

## ໝວດວ່າດ້ວຍການບໍ່ຮັບສິ່ງຂອງ

## ໑. ອະສຳປະທານະຊາດົກ (໑໓໑)

## ວ່າດ້ວຍການບໍ່ຮັບສິ່ງຂອງທີ່ເຮັດໃຫ້ເກີດການແຕກຮ້າວ

(ສັງຂະເສດຖີໂພທິສັດກ່າວກັບພັນລະຍາຜູ້ຮ້ອງໄຫ້ຢູ່ວ່າ)

[໑໓໑] ມິດໄມຕີຂອງຜູ້ໃດຜູ້ໜຶ່ງເຊິ່ງເປັນຄົນພານ
ຍ່ອມເປັນໂທດຍ້ອນການບໍ່ຮັບສິ່ງຂອງ
ເພາະສະນັ້ນ ອ້າຍຈຶ່ງນຳເຂົ້າລີບເຄິ່ງມານະມາດ້ວຍຄິດວ່າ
ມິດໄມຕີຂອງເຮົາຢ່າໄດ້ແຕກຮ້າວກັນເລີຍ
ຂໍມິດໄມຕີຂອງເຮົານີ້ຈົ່ງຍັ່ງຍືນຕໍ່ໄປ

**ອະສຳປະທານະຊາດົກທີ ໑ ຈົບ**

## ໘. ປັນຈະພິຣຸກະຊາດົກ (໑໓໘)

## ວ່າດ້ວຍຄວາມບໍ່ຢ້ານຕົກໃຈ

(ພຣະໂພທິສັດຄິດເຖິງເຫດການທີ່ຕົນລອດພົ້ນຈາກນາງຍັກສີນີ ຈຶ່ງເປ່ງອຸທານວ່າ)

[໑໓໘] ເຮົາບໍ່ຕົກຢູ່ໃນອຳນາດຂອງພວກຣາກສົດ
ຍ້ອນຄວາມພຽນອັນໝັ້ນຄົງໃນຄຳແນະນຳຂອງທ່ານຜູ້ສະຫຼາດ
ແລະຍ້ອນຄວາມບໍ່ຫວາດຫວັ່ນຕໍ່ໄພແລະຄວາມຢ້ານ
ຄວາມໂຊກດີຈາກໄພອັນໃຫຍ່ຫຼວງນັ້ນຈຶ່ງມີແກ່ເຮົາ

**ປັນຈະພິຣຸກະຊາດົກທີ ໘ ຈົບ**

## ໓. ຄະຕະສານະຊາດົກ (໑໖໓)
## ວ່າດ້ວຍໄພເກີດຈາກບ່ອນເພິ່ງ

(ພະຍານົກໂພທິສັດເຫັນແປວໄຟລຸກພຸ່ງຈາກນ້ຳ ຈຶ່ງຊວນພວກນົກໄປຢູ່ບ່ອນອື່ນວ່າ)

[໑໖໓] ຄວາມກະເສມສຳຣານມີຢູ່ເທິງຜືວນ້ຳໃດ
ເທິງຜິວນ້ຳນັ້ນມີສັດຕູເກີດຂຶ້ນ ໄຟລຸກພຸ່ງຂຶ້ນຢູ່ທ່າມກາງນ້ຳ
ວັນນີ້ ຈະຢູ່ເທິງຕົ້ນໄມ້ເຊິ່ງເກີດຢູ່ພື້ນດິນບໍ່ໄດ້ອີກ
ພວກເຈົ້າຈົ່ງພາກັນບິນໄປສູ່ທິດຕ່າງ ໆ ເທີ້ນ
ວັນນີ້ ທີ່ເພິ່ງຂອງພວກເຮົາມີໄພເກີດຂຶ້ນແລ້ວ

**ຄະຕະສານະຊາດົກທີ ໓ ຈົບ**

## ໔. ຊານະໂສທະນະຊາດົກ (໑໖໔)
## ວ່າດ້ວຍສຸກເກີດແຕ່ຊານ

(ພຣະໂພທິສັດມາຈາກພົມມະໂລກຊັ້ນອາພັດສະຣະພົມຢູ່ໃນອາກາດແລ້ວກ່າວວ່າ)

[໑໖໔] ສັດເຫຼົ່າໃດມີສັນຍາ ແມ່ນສັດເຫຼົ່ານັ້ນກໍຊື່ວ່າເປັນທຸກຄະຕະສັດ
ສັດເຫຼົ່າໃດບໍ່ມີສັນຍາ ແມ່ນສັດເຫຼົ່ານັ້ນກໍຊື່ວ່າເປັນທຸກຄະຕະສັດ
ພວກທ່ານຈົ່ງລະເວັ້ນສັນຍີພົບແລະອະສັນຍີພົບທັງ ໒ ຢ່າງນັ້ນສາ
ຄວາມສຸກອັນເກີດຈາກສະມາບັດນັ້ນ
ເປັນຄວາມສຸກທີ່ບໍ່ມີກິເລດເຄື່ອງກວນໃຈ

**ຊານະໂສທະນະຊາດົກທີ ໔ ຈົບ**

## ໕. ຈັນທາພະຊາດົກ (໑໖໕)
## ວ່າດ້ວຍຜູ້ຈະເລີນແສງຈັນເປັນອາລົມ

(ພຣະໂພທິສັດມາຈາກພົມມະໂລກຊັ້ນອາພັດສະຣະພົມຢູ່ໃນອາກາດແລ້ວກ່າວວ່າ)

[໑໖໕] ບຸກຄົນໃດໃນໂລກນີ້ຍັງຖືກະສິນມີແສງຈັນ
ແລະແສງອາທິດເປັນອາລົມດ້ວຍປັນຍາ
ບຸກຄົນນັ້ນຍ່ອມເຂົ້າເຖິງອາພັດສະຣະພົມໄດ້ດ້ວຍຊານອັນບໍ່ມີວິຕົກ

**ຈັນທາພະຊາດົກທີ ໕ ຈົບ**

## ໖. ສຸວັນນະຫັງສະຊາດົກ (໑໓໖)
## ວ່າດ້ວຍພະຍາຫົງຄຳຖືກລົກຂົນ

(ພຣະສາດສະດາຊົງປະມວນເລື້ອງໃນອະດີດມາຕັດສອນຖຸນລະນັນທາພິກຂຸນີຜູ້ມັກຫຼາຍແລ້ວ
ຕັດພຣະຄາຖານີ້ວ່າ)

[໑໓໖] ບຸກຄົນໄດ້ສິ່ງໃດ ຄວນຍິນດີສິ່ງນັ້ນ
ຍ້ອນຄວາມໂລບເກີນໄປເປັນຄວາມຊົ່ວແທ້
ນາງພາມມະນີຈັບເອົາພະຍາຫົງຄຳແລ້ວຈຶ່ງເສື່ອມຈາກຄຳ

**ສຸວັນນະຫັງສະຊາດົກທີ ໖ ຈົບ**

## ໗. ພັບພຸຊາດົກ (໑໓໗)
## ວ່າດ້ວຍວິທີເຮັດໃຫ້ແມວຕາຍ

(ພຣະສາດສະດາຊົງປະມວນເລື້ອງໃນອະດີດມາ ຕັດພຣະຄາຖານີ້ວ່າ)

[໑໓໗] ແມວຕົວໜຶ່ງໄດ້ໜູຫຼືເນື້ອໃນບ່ອນໃດ
ແມວຕົວທີ ໒ ຕົວທີ ໓ ແລະຕົວທີ ໔ ກໍເກີດໃນທີ່ນັ້ນ
ແມວເຫຼົ່ານັ້ນເອົາເອິກຟາດປ່ອງແກ້ວຜຼຶກນີ້ແລ້ວເສຍຊີວິດ

**ພັບພຸຊາດົກທີ ໗ ຈົບ**

## ໘. ໂຄທະຊາດົກ (໑໓໘)
## ວ່າດ້ວຍພະຍາເຫ້ຍ

(ພະຍາເຫ້ຍໂພທິສັດຕິຕຽນ ດາບົດ ວ່າ)

[໑໓໘] ນີ້ເຈົ້າຜູ້ໂງ່ຈ້າ ຈະມີປະໂຫຍດອັນໃດແກ່ເຈົ້າ
ດ້ວຍຊະດາແລະການນຸ່ງຫົ່ມໜັງເສືອເຫຼືອງ
ພາຍໃນຂອງເຈົ້າແສນຈະຮົກ ແລະ ເປິະເປື້ອນ
ເຈົ້າດີແຕ່ຂັດສີພາຍນອກທີ່ນັ້ນ

**ໂຄທະຊາດົກທີ ໘ ຈົບ**

## ໙. ອຸພະໂຕພັດຖະຊາດົກ (໑໓໙)
## ວ່າດ້ວຍຜູ້ເສື່ອມປະໂຫຍດທັງ ໔ ດ້ານ

(ຣຸກຂະເທວະດາໂພທິສັດກ່າວຕິຕຽນນາຍພານເບັດວ່າ)

[໑໓໙] ຕາຂອງເຈົ້າກໍແຕກທັງ ໔ ຂ້າງ ຜ້ານຸ່ງກໍຫາຍ
ພັນລະຍາຂອງເຈົ້າກໍຜິດຖຽງກັບເພື່ອນບ້ານແລ້ວ
ວຽກງານທັງທາງນ້ຳແລະທາງບົກກໍເສຍຫາຍທັງ ໔ ດ້ານ

**ອຸພະໂຕພັດຖະຊາດົກທີ ໙ ຈົບ**

## ໑໐. ກາກະຊາດົກ (໑໔໐)
## ວ່າດ້ວຍກາບໍ່ມີນ້ຳມັນແຫຼວ

(ກາໂພທິສັດສະແດງທຳວ່າ)

[໑໔໐] ກາທັງຫຼາຍມີໃຈຫວາດຜະຫວາຢູ່ເປັນນິດ
ມີປົກກະຕິບຽດບຽນຊາວໂລກທັງມວນ
ເພາະສະນັ້ນ ມັນແຫຼວຂອງກາທັງຫຼາຍ
ຜູ້ເປັນຍາດຂອງຂ້າພະເຈົ້າຈຶ່ງບໍ່ມີ

**ກາກະຊາດົກທີ ໑໐ ຈົບ**

**ອະສຳປະທານະວັກທີ ໑໔ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ອະສຳປະທານະຊາດົກ
໒. ຄະຕະສານະຊາດົກ
໓. ຈັນທາພະຊາດົກ
໔. ພັບພຸຊາດົກ
໕. ປັນຈະພິຣຸກະຊາດົກ
໖. ຊານະໂສທະນະຊາດົກ
໗. ສຸວັນນະຫັງສະຊາດົກ
໘. ໂຄທະຊາດົກ
໙. ອຸພະໂຕພັດຖະຊາດົກ
໑໐. ກາກະຊາດົກ

# ໑໕. ກະກັນຕະກະວັກ

## ໝວດວ່າດ້ວຍກະປອມ

໑. ໂຄທະຊາດົກ (໑໔໑)

### ວ່າດ້ວຍຕະກູນເຫ້ຍປະສົບຄວາມພິນາດ

(ພະຍາເຫ້ຍໂພທິສັດເມື່ອຈະໜີໄປທາງປ່ອງລົມ ຈຶ່ງກ່າວວ່າ)

[໑໔໑] ບຸກຄົນຄົບຫາຄົນຊົ່ວຍ່ອມບໍ່ປະສົບຄວາມສຸກເລີຍ
ເໝືອນຕະກູນເຫ້ຍເຮັດຕົນເອງໃຫ້ປະສົບຄວາມວອດວາຍຍ້ອນກະປອມ

**ໂຄທະຊາດົກທີ ໑ ຈົບ**

## ໘. ສິງຄາລະຊາດົກ (໑໔໘)

### ວ່າດ້ວຍໝາຈອກໂພທິສັດ

(ໝາຈອກໂພທິສັດກ່າວຕິຕຽນນັກເລງວ່າ)

[໑໔໘] ເຫດທີ່ທ່ານນອນລວງເໝືອນຄົນຕາຍນັ້ນຮູ້ໄດ້ຍາກ
ໄມ້ຄ້ອນຂອງທ່ານເມື່ອຂ້າພະເຈົ້າຄາບປາຍລາກມາກໍບໍ່ຫຼຸດຈາກມື

**ສິງຄາລະຊາດົກທີ ໘ ຈົບ**

## ໙. ວິໂຣຈະນະຊາດົກ (໑໔໙)

### ວ່າດ້ວຍຄົນຖືກເຍີ້ຍຫຍັນວ່າຮຸ່ງເຮືອງ

(ພະຍາໄກສອນຣາດຊະສີໂພທິສັດກ່າວກັບໝາຈອກວ່າ)

[໑໔໙] ມັນສະໝອງຂອງເຈົ້າສວດອອກມາ
ຫົວຂອງເຈົ້າກໍຖືກທຳລາຍ
ສີຂ້າງຂອງເຈົ້າກໍຫັກໝົດ
ມື້ນີ້ ເຈົ້າຊ່າງຮຸ່ງເຮືອງແທ້ນໍ

**ວິໂຣຈະນະຊາດົກທີ ໙ ຈົບ**

## ໔. ນັງຄຸດຖະຊາດົກ (໑໔໔)
## ວ່າດ້ວຍການບູຊາໄຟດ້ວຍຫາງງົວ

(ພາມບູຊາໄຟຜູ້ເປັນໂພທິສັດເຂົ້າໃຈວ່າການບູຊາໄຟບໍ່ມີປະໂຫຍດ ຈຶ່ງກ່າວວ່າ)

[໑໔໔] ໄຟອະສັດຕະບຸຣຸດ ການທີ່ເຮົາບູຊາເຈົ້າດ້ວຍຫາງນັ້ນກໍຫຼາຍພໍແລ້ວ
ມື້ນີ້ ຊີ້ນບໍ່ມີສຳລັບເຈົ້າຜູ້ມັກຊີ້ນ
ຂໍທ່ານຜູ້ຈະເລີນຈົ່ງຮັບເອົາພຽງຫາງເທີ້ນ

**ນັງຄຸດຖະຊາດົກທີ ໔ ຈົບ**

## ໕. ຣາທະຊາດົກ (໑໔໕)
## ວ່າດ້ວຍລູກນົກແຂກເຕົ້າຣາທະ

(ນົກແຂກເຕົ້າໂພທິສັດໄດ້ກ່າວເຕືອນນ້ອງຣາທະວ່າ)

[໑໔໕] ຣາທະ ເຈົ້າຍັງບໍ່ຮູ້ວ່າ
ຄົນທີ່ຍັງບໍ່ມາໃນປະຖົມຍາມມີປະມານເທົ່າໃດ
ເຈົ້າເວົ້າໂລເລໂງ່ ໆ ໄປເອງ
ໃນເມື່ອແມ່ໂກສີແມ່ເຖົ້ານີ້ໝົດຄວາມເຍື່ອໃຍໃນບິດາຂອງເຮົາແລ້ວ

**ຣາທະຊາດົກທີ ໕ ຈົບ**

## ໖. ກາກະຊາດົກ (໑໔໖)
## ວ່າດ້ວຍກາສະນ້ຳດ້ວຍຈະງອຍປາກ

(ຝູງກາເປີກສາກັນແລ້ວເວົ້າວ່າບໍ່ສາມາດຈະເຮັດທະເລໃຫ້ແຫ້ງໄດ້ ຈຶ່ງກ່າວວ່າ)

[໑໔໖] ຄາງຂອງພວກເຮົາເມື່ອຍລ້າແລ້ວນໍ ປາກກໍເມື້ນ
ພວກເຮົາພາກັນສະນ້ຳຢູ່ກໍບໍ່ອາດເຮັດໃຫ້ນ້ຳແຫ້ງໄດ້
ຫ້ວງນ້ຳໃຫຍ່ກໍຍັງຄົງເຕັມຢູ່ຄືເກົ່າ

**ກາກະຊາດົກທີ ໖ ຈົບ**

## ໗. ປຸບຜະຣັດຕະຊາດົກ (໑໘໗)
## ວ່າດ້ວຍຜ້າທີ່ຍ້ອມດ້ວຍດອກຄຳ

(ຄົນເຂັນໃຈບໍ່ໃສ່ໃຈເຖິງຄວາມທຸກຂອງຕົນ ນຶກເຖິງແຕ່ຍິງຄົນຮັກນັ້ນຢ່າງດຽວ ຈຶ່ງຮຳຮອນເຖິງໂອກາດຜ່ານໄປແລ້ວວ່າ)

[໑໘໗] ການທີ່ຖືກສຽບແທງດ້ວຍຫຼາວ
ແລະການທີ່ກາສັບຂ້າພະເຈົ້ານີ້ບໍ່ໄດ້ເປັນທຸກແກ່ຂ້າພະເຈົ້າເລີຍ
ການທີ່ນາງເນື້ອທອງຈັກບໍ່ໄດ້ນຸ່ງຫົ່ມຜ້າທີ່ຍ້ອມດ້ວຍດອກຄຳ
ທ່ຽວງານຕະຫຼອດຄືນກາງເດືອນ ໑໔ ນັ້ນ ເປັນທຸກຂອງຂ້າພະເຈົ້າ

**ປຸບຜະຣັດຕະຊາດົກທີ ໗ ຈົບ**

## ໘. ສິງຄາລະຊາດົກ (໑໘໘)
## ວ່າດ້ວຍໝາຈອກເຂົ້າໄປໃນສົບຊ້າງ

(ໝາຈອກໂພທິສັດຕິດຢູ່ໃນທ້ອງຊ້າງຕາຍເກີດຄວາມສັງເວດ ຈຶ່ງກ່າວວ່າ)

[໑໘໘] ບໍ່ເອົາອີກແລ້ວ ບໍ່ເອົາອີກແລ້ວ
ເຮົາຈະບໍ່ເຂົ້າໄປໃນສົບຊ້າງອີກແລ້ວ
ເພາະໃນເວລາທີ່ເຂົ້າໄປຢູ່ໃນສົບຊ້າງນີ້
ເຮົາຮູ້ສຶກຢ້ານຕາຍ

**ສິງຄາລະຊາດົກທີ ໘ ຈົບ**

## ໙. ເອກະປັນນະຊາດົກ (໑໘໙)
## ວ່າດ້ວຍຕົ້ນໄມ້ມີດ້ານລະໃບ

(ທຸດຖະຣາດຊະກຸມານເຂົ້າໃຈຕົ້ນກະເດົາວ່າຈະຂ້າມະນຸດໄດ້ ຈຶ່ງລົກໜໍ່ກະເດົາບີບຈົນແຫຼກແລ້ວຕັດວ່າ)

[໑໘໙] ຕົ້ນໄມ້ນີ້ມີໃບດ້ານລະໃບ ຈາກພື້ນດິນສູງຍັງບໍ່ເຖິງ ໔ ນີ້ວ
ຜົນມີຣົດເຊັ່ນກັບຢາພິດ ເມື່ອໃຫຍ່ຂຶ້ນຈະເປັນແນວໃດນໍ

**ເອກະປັນນະຊາດົກທີ ໙ ຈົບ**

# ໑໐. ສັນຊີວະຊາດົກ (໑໕໐)
## ວ່າດ້ວຍສັນຊີວະມານົບຕາຍ

(ອາຈານທິສາປາໂມກໂພທິສັດຮຽກມານົບມາເຕືອນວ່າ)

[໑໕໐] ຜູ້ໃດຍ້ອງຍໍແລະຄົບຫາຄົນຊົ່ວ
ຄົນຊົ່ວຍ່ອມເຮັດຜູ້ນັ້ນໃຫ້ເປັນເຫຍື່ອ
ເໝືອນເສືອໂຄ່ງທີ່ສັນຊີວະມານົບເຮັດໃຫ້ຟື້ນຂຶ້ນ
ແລ້ວເຮັດສັນຊີວະມານົບໃຫ້ເປັນເຫຍື່ອ

**ສັນຊີວະຊາດົກທີ ໑໐**

**ຈົບ ກະກັນຕະກະວັກທີ ໑໕ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ໂຄທະຊາດົກ
໒. ວິໂຣຈະນະຊາດົກ
໓. ຣາທະຊາດົກ
໔. ປຸບຜະຣັດຕະຊາດົກ
໕. ເອກະປັນນະຊາດົກ
໖. ສິງຄາລະຊາດົກ
໗. ບັງຄຸດຖະຊາດົກ
໘. ກາກະຊາດົກ
໙. ສິງຄາລະຊາດົກ
໑໐. ສັນຊີວະຊາດົກ

**ອຸປະຣິປັນນາດ ຈົບ**

## ລວມວັກທີ່ມີໃນນິບາດນີ້ ຄື

໑. ອະປັນນະກະວັກ
໒. ກຸຣຸງຄະວັກ
໓. ອັດຖະກາມະວັກ
໔. ອິດຖີວັກ
໕. ອະປາຍິມຫະວັກ
໖. ສີລະວັກ
໗. ກຸລາວະກະວັກ
໘. ອາສິງສະວັກ
໙. ວະຣຸນະວັກ
໑໐. ລິດຕະວັກ
໑໑. ປະໂຣສະຕະວັກ
໑໒. ກຸສະນາລີວັກ
໑໓. ກະກັນຕະກະວັກ
໑໖. ຫັງສີວັກ
໑໗. ອະສຳປະທານະວັກ

**ຊາດົກທີ່ປະດັບເອກກະນິບາດ ຈົບ**

# ໔. ທຸກະນິບາດ

## ໑. ທັນລະຫະວັກ

### ໝວດວ່າດ້ວຍຄວາມກະດ້າງ

## ໑. ຣາໂຊວາທະຊາດົກ (໑໕໑)

### ວ່າດ້ວຍພຣະຣາໂຊວາດ

(ນາຍສາຣະຖີຂອງພຣະເຈົ້າພັນລິກະກ່າວອວດພຣະກຽດຕິຄຸນພຣະຣາຊາຂອງຕົນວ່າ)

[໑] ພຣະເຈົ້າພັນລິກະຊົງກຳຈັດຄົນກະດ້າງດ້ວຍຄວາມຮຸນແຮງ
ຊົງຊະນະຄົນອ່ອນໂຍນດ້ວຍຄວາມອ່ອນໂຍນ
ຊົງຊະນະຄົນດີດ້ວຍຄວາມດີ ຊົງຊະນະຄົນບໍ່ດີດ້ວຍຄວາມບໍ່ດີ
ພຣະຣາຊາອົງນີ້ເປັນເຊັ່ນນາຍສາຣະຖີ
ທ່ານຈົ່ງຫຼີກທາງຖວາຍພຣະຣາຊາຂອງເຮົາເທີ້ນ

(ນາຍສາຣະຖີຂອງພຣະເຈົ້າພາຣານະສີກ່າວພຣະກຽດຕິຄຸນພຣະຣາຊາຂອງຕົນວ່າ)

[໔] ພຣະເຈົ້າເມືອງພາຣານະສີຊົງຊະນະຄົນໂກດດ້ວຍຄວາມບໍ່ໂກດ
ຊົງຊະນະຄົນບໍ່ດີດ້ວຍຄວາມດີ ຊົງຊະນະຄົນຂີ້ຖີ່ດ້ວຍການໃຫ້
ຊົງຊະນະຄົນເວົ້າໂລເລດ້ວຍຄຳສັດ
ພຣະຣາຊາອົງນີ້ເປັນເຊັ່ນນີ້ ນາຍສາຣະຖີ
ທ່ານຈົ່ງຫຼີກທາງຖວາຍພຣະຣາຊາຂອງເຮົາເທີ້ນ

**ຣາໂຊວາທະຊາດົກທີ ໑ ຈົບ**

## ໔. ສິງຄາລະຊາດົກ (໑໕໔)

### ວ່າດ້ວຍເຫດທີ່ເຮັດໃຫ້ໝາຈອກຕາຍ

(ຣາດຊະສີໂພທິສັດເຫັນອ້າຍທັງ ໖ ຕາຍ ຈຶ່ງກ່າວວ່າ)

[໖] ວຽກງານເຫຼົ່ານັ້ນຍ່ອມເຮັດບຸກຄົນຜູ້ບໍ່ໄດ້ພິຈາລະນາ
ເຮັດດ້ວຍຄວາມຮີບຮ້ອນໃຫ້ເດືອດຮ້ອນເໝືອນກິນຂອງຮ້ອນເຂົ້າໄປໃນປາກ

(ພຣະສາດສະດາຕັດເທດທີ່ໝາຈອກຕາຍວ່າ)

[໔] ຣາດຊະສີໄດ້ບັນລືສີຫະນາດໄປທົ່ວພູເງິນ
ໝາຈອກທີ່ອາໄສຢູ່ໃນພູເງິນ
ໄດ້ຍິນສຽງກຶກກ້ອງຂອງຣາດຊະສີ
ເກີດຄວາມຢ້ານຄວາມສະດຸ້ງຈົນຫົວໃຈແຕກຕາຍ

**ສິງຄາລະຊາດົກທີ ໔ ຈົບ**

## ໕. ສູກະຣະຊາດົກ (໑໕໓)
## ວ່າດ້ວຍໝູທ້າຣາດຊະສີ

(ໝູເມື່ອຈະທ້າຣາດຊະສີໂພທິສັດໃຫ້ຕໍ່ສູ້ກັນ ຈຶ່ງກ່າວວ່າ)

[໕] ນີ້ສະຫາຍ ເຮົາກໍມີ ໔ ຕີນ ເຖິງທ່ານກໍມີ ໔ ຕີນ
ຈົ່ງກັບມາກ່ອນສະຫາຍ ທ່ານຢ້ານເຮົາບໍ ຈຶ່ງໄດ້ໜີໄປ

(ຣາດຊະສີໂພທິສັດກ່າວຕອບວ່າ)

[໖] ນີ້ເຈົ້າໝູຜູ້ສະຫາຍ ເຈົ້າມີເນື້ອຕົວບໍ່ສະອາດ
ຂົນກໍເໝັນເນົ່າ ມີກິ່ນເໝັນຟຸ້ງກະຈາຍໄປ
ຖ້າເຈົ້າຕ້ອງການຈະສູ້ຮົບກັບເຮົາ ເຮົາຂໍຍົກໄຊຊະນະໃຫ້ເຈົ້າ

**ສູກະຣະຊາດົກທີ ໕ ຈົບ**

## ໖. ອຸຣະຄະຊາດົກ (໑໕໔)
## ວ່າດ້ວຍງູມີຄຸນທຳສູງ

(ພະຍາຄຸດຣຽກພຣະໂພທິສັດມາປະກາດໃຫ້ຮູ້ວ່າ ຈັກຈັບພະຍານາກແລ້ວກິນ ຈຶ່ງກ່າວວ່າ)

[໗] ພະຍານາກຜູ້ປະເສີດກວ່າງູທັງຫຼາຍຕ້ອງການຈະພົ້ນຈາກຂ້າພະເຈົ້າ
ຈຶ່ງໄດ້ແປງກາຍເປັນແກ້ວມະນີ ເຂົ້າໄປຢູ່ໃນຜ້າເປືອກໄມ້ນີ້
ກໍຂ້າພະເຈົ້າເປັນຜູ້ມີຄວາມເຄົາລົບຢຳເກງເພດອັນປະເສີດຂອງທ່ານ
ເຖິງຈະຫິວກໍບໍ່ສາມາດທີ່ຈະຈັບພະຍານາກຕົວນັ້ນກິນໄດ້

(ພຣະໂພທິສັດດາບົດກ່າວຊົມເຊີຍພະຍາຄຸດວ່າ)

[໗]	ທ່ານນັ້ນເປັນຜູ້ເຄົາລົບຢຳເກງເພດອັນປະເສີດ
ເຖິງຈະຫິວກໍບໍ່ອາດທີ່ຈະຈັບພະຍານາກຕົວນັ້ນມາກິນໄດ້
ຂໍທ່ານນັ້ນຈົ່ງເປັນຜູ້ອັນພົມຮັກສາຄຸ້ມຄອງແລ້ວ
ຈົ່ງດຳຣົງຊີວິດຢູ່ສິ້ນການລະນານ
ອັນໜຶ່ງ ອາຫານທິບຈົ່ງຜາກົດມີແກ່ທ່ານ

**ອຸຣະຄະຊາດົກທີ ໔ ຈົບ**

# ໕. ພັກຄະຊາດົກ (໑໕໕)

## ວ່າດ້ວຍບິດາພຣະໂພທິສັດຊື່ພັກຄະ

(ພາມໂພທິສັດເຫັນຍັກລົງມາ ຈຶ່ງກ່າວຜາຣົບກັບບິດາວ່າ)

[໙]	ພໍ່ພັກຄະ ຂໍພໍ່ຈົ່ງມີຊີວິດຢູ່ເຖິງ ໑໒໐ ປີ
ຂໍພວກປີສາດຈົ່ງຢ່າໄດ້ກິນເຮົາເລີຍ
ຂໍພໍ່ຈົ່ງມີຊີວິດຢູ່ເຖິງ ໑໒໐ ປີເທີ້ນ

(ພຣະໂພທິສັດເຫັນຍັກລົງມາຫາບຸດ ຈຶ່ງກ່າວຜາຣົບກັບບຸດ ວ່າ)

[໑໐]	ແມ່ນເຈົ້າກໍຈົ່ງມີຊີວິດຢູ່ເຖິງ ໑໒໐ ປີ
ຂໍພວກຜີສາດຈົ່ງກິນຢາພິດ
ຂໍເຈົ້າຈົ່ງມີຊີວິດຢູ່ເຖິງ ໑໒໐ ປີເທີ້ນ

**ພັກຄະຊາດົກທີ ໕ ຈົບ**

# ໖. ອະລີນະຈິດຕະຊາດົກ (໑໕໖)

## ວ່າດ້ວຍພຣະເຈົ້າອະລີນະຈິດຕະ

(ພຣະສາດສະດາຊົງນຳເລື້ອງອະດີດນີ້ມາໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ)

[໑໑]	ເສນາໝູ່ໃຫຍ່ອາໄສພຣະເຈົ້າອະລີນະຈິດຕະ ມີໃຈຣ່າເຣິງ
ໄດ້ຈັບເປັນພຣະເຈົ້າໂກສົນຜູ້ບໍ່ຊົງອີ່ມໃນຣາດຊະສົມບັດຂອງຕົນ ສັນໃດ

[໑໒]	ພິກຂຸຜູ້ເຖິງພ້ອມດ້ວຍນິໄສ ຜາຣົບຄວາມພຽນ
ຈະເລີນກຸສົນທຳເພື່ອບັນລຸນິບພານອັນເປັນແດນກະເສມຈາກໂຍຄະ
ເພິ່ງບັນລຸທຳອັນເປັນທີ່ສິ້ນໄປແຫ່ງສັງໂຍດທັງປວງໂດຍລຳດັບ ສັນນັ້ນ

**ອະລີນະຈິດຕະຊາດົກທີ ໖ ຈົບ**

# ຖ. ຄຸນະຊາດົກ (໑໕ຖ)

## ວ່າດ້ວຍມິດທຳ

(ໝາຈອກຟັງຄຳຂອງນາງໝາຈອກແລ້ວຈຶ່ງເຂົ້າໄປຫາຣາດຊະສີໂພທິສັດ ບອກເຫດທີ່ພັນລະຍາ ແລະບຸດຂອງຣາດຊະສີລົບກວນແລ້ວວ່າ)

[໑໓] ຜູ້ມີອຳນາດຍ່ອມຂັບໄລ່ຜູ້ນ້ອຍໄດ້ຕາມຄວາມພໍໃຈຂອງຕົນ
ນີ້ເປັນທຳມະດາຂອງຜູ້ມີກຳລັງ
ນາງມະລິຄີຜູ້ມີແຂ້ວແຫຼມຄົມບັນລືສີຫະນາດ
ຄຸກຄາມບຸດແລະພັນລະຍາຂອງຂ້າພະເຈົ້າ
ຂໍທ່ານຈົ່ງຮູ້ແບບນີ້
ທີ່ເພິ່ງຂອງພວກເຮົາມີໄພເກີດຂຶ້ນແລ້ວ

(ຣາດຊະສີໂພທິສັດກ່າວເຕືອນນາງຣາດຊະສີວ່າ)

[໑໔] ເຖິງແມ່ນວ່າມິດຈະມີກຳລັງດ້ອຍກວ່າ
ແຕ່ດຳຣົງຢູ່ໃນມິດທຳ
ເຂົາຊື່ວ່າເປັນຍາດ ເປັນເຜົ່າພັນ
ເປັນມິດ ແລະເປັນເພື່ອນຂອງເຮົາ
ນີ້ນາງຜູ້ມີແຂ້ວແຫຼມຄົມ
ເຈົ້າຢ່າໄດ້ດູໝິ່ນໝາຈອກຜູ້ໃຫ້ຊີວິດແກ່ເຮົາອີກເລີຍ

**ຄຸນະຊາດົກທີ ຖ ຈົບ**

# ໗. ສຸຫະນຸຊາດົກ (໑໕໗)

## ວ່າດ້ວຍພຶດຕິກຳຂອງມ້າສຸຫະນຸ

(ອຳມາດສຳເລັດຣາດຊະກິດໂພທິສັດໄດ້ຂາບທູນພຣະຣາຊາເຖິງພຶດຕິກຳຂອງມ້າວ່າ)

[໑໕] ການທີ່ມ້າພະຍົດສຸຫະນຸກັບມ້າພະຍົດໂສນະ
ທຳຄວາມສະໜິດສະໜົມກັນບໍ່ແມ່ນເລື້ອງຜິດປົກກະຕິ
ມ້າໂສນະເປັນເຊັ່ນໃດ ແມ່ນມ້າສຸຫະນຸກໍເປັນເຊັ່ນນັ້ນ
ມ້າໂສນະມີອາລົມດຸຮ້າຍເຊັ່ນໃດ
ມ້າສຸຫະນຸກໍມີອາລົມດຸຮ້າຍເຊັ່ນນັ້ນ

[໑໖] ມ້າທັງ ໔ ຕົວມີປົກກະຕິແລ່ນໄປທົ່ວດ້ວຍອາລົມ

ຄືກຄະນອງມັກກັດເຊືອກລ່າມຕົວເອງເປັນປະຈຳພໍ ໆ ກັນ
ຄວາມຊົ່ວເຂົ້າກັນໄດ້ກັບຄວາມຊົ່ວ
ຄວາມບໍ່ສະງົບເຂົ້າກັນໄດ້ກັບຄວາມບໍ່ສະງົບ

**ສຸຫະນຸຊາດົກທີ ໙ ຈົບ**

# ໗. ໂມຣະຊາດົກ (໑໕໗)

## ວ່າດ້ວຍນົກຍູງ

(ນົກຍູງຄຳໂພທິສັດເມື່ອຈະຜູກມົນເພື່ອຮັກສາປ້ອງກັນຕົວກ່ອນອອກຫາກິນ ໄດ້ກ່າວຄາຖານີ້ວ່າ)

[໑໗] ດວງຕາຂອງໂລກ
ເປັນເຈົ້າແຫ່ງແສງສະຫວ່າງອັນເອກ
ກຳລັງອຸໄທທໍແສງເຮືອງຮອງສະຫວ່າງໄປທົ່ວປະຖະພີ
ຍ້ອນເຫດນັ້ນ ຂ້າພະເຈົ້າຂໍນ້ອມໄຫວ້ພຣະອາທິດນັ້ນ
ເຊິ່ງທໍແສງເຮືອງຮອງສະຫວ່າງໄປທົ່ວປະຖະພີ
ວັນນີ້ ເມື່ອຂ້າພະເຈົ້າໄດ້ຮັບການຄຸ້ມຄອງຈາກທ່ານແລ້ວ
ເພິ່ງຢູ່ເປັນສຸກຕະຫຼອດວັນ
ພາມເຫຼົ່າໃດເຖິງຝັ່ງແຫ່ງພຣະເວດໃນທຳທັງປວງ
ຂໍພາມເຫຼົ່ານັ້ນຈົ່ງຮັບຄວາມນອບນ້ອມຂອງຂ້າພະເຈົ້າ
ແລະຂໍຈົ່ງຄຸ້ມຄອງຂ້າພະເຈົ້າ
ຂ້າພະເຈົ້າຂໍນອບນ້ອມພຣະພຸດທະເຈົ້າທັງຫຼາຍ
ພຣະໂພທິຍານຂອງພຣະພຸດທະເຈົ້າເຫຼົ່ານັ້ນ
ພຣະພຸດທະເຈົ້າທັງຫຼາຍຜູ້ຫຼຸດພົ້ນແລ້ວ
ແລະວິມຸດຕິທຳຂອງພຣະພຸດທະເຈົ້າຜູ້ຫຼຸດພົ້ນແລ້ວເຫຼົ່ານັ້ນ
ນົກຍູງນັ້ນຈະເລີນພຣະປະຣິດນີ້ແລ້ວຈຶ່ງທ່ຽວສະແຫວງຫາອາຫານ

(ນົກຍູງຄຳນັ້ນ ເມື່ອກັບບ່ອນພັກໃນເວລາຄ່ຳ ໄດ້ກ່າວຄາຖານີ້ວ່າ)

[໑໘] ດວງຕາຂອງໂລກນີ້
ເປັນເຈົ້າແຫ່ງແສງສະຫວ່າງອັນເອກ
ທໍແສງເຮືອງຮອງສະຫວ່າງໄປທົ່ວປະຖະພີ ອັດສະດົງຄົດລົງແລ້ວ
ຍ້ອນເຫດນັ້ນ ຂ້າພະເຈົ້າຂໍນ້ອມໄຫວ້ພຣະອາທິດນັ້ນ

ເຊິ່ງທໍາແສງເຮືອງຮອງສະຫວ່າງໄປທົ່ວປະຖະພີ
ວັນນີ້ ຂ້າພະເຈົ້າໄດ້ຮັບການຄຸ້ມຄອງຈາກທ່ານແລ້ວ
ເພິ່ງຢູ່ເປັນສຸກຕະຫຼອດຄືນ
ພາມເຫຼົ່າໃດເຖິງຝັ່ງແຫ່ງພຣະເວດໃນທໍາທັງມວນ
ຂໍພາມເຫຼົ່ານັ້ນຈົ່ງຮັບຄວາມນອບນ້ອມຂອງຂ້າພະເຈົ້າ
ແລະຂໍຈົ່ງຄຸ້ມຄອງຂ້າພະເຈົ້າ
ຂ້າພະເຈົ້າຂໍນອບນ້ອມພຣະພຸດທະເຈົ້າທັງຫຼາຍ
ພຣະໂພທິຍານຂອງພຣະພຸດທະເຈົ້າເຫຼົ່ານັ້ນ
ພຣະພຸດທະເຈົ້າທັງຫຼາຍຜູ້ຫຼຸດພົ້ນແລ້ວ
ແລະວິມຸດຕິທໍາແຫ່ງພຣະພຸດທະເຈົ້າຜູ້ຫຼຸດພົ້ນແລ້ວເຫຼົ່ານັ້ນ
ນົກຍູງນັ້ນຈະເລີນພຣະປະຣິດນີ້ແລ້ວຈຶ່ງຢູ່ໃນທີ່ບ່ອນຂອງຕົນ

**ໂມຣະຊາດົກທີ ໙ ຈົບ**

## ໑໐. ວິນີລະກະຊາດົກ (໑໙໐)

## ວ່າດ້ວຍກາວິນີລະກະ

(ກາວິນີລະກະກໍາລັງບິນຢູ່ເທິງອາກາດເຫັນພຣະເຈົ້າເມືອງວິເທຫະປະທັບເທິງລົດເຊິ່ງທຽມດ້ວຍມ້າສິນທົບ ໔ ຕົວ ຈຶ່ງກ່າວວ່າ)

[໑໙] ມ້າອາຊາໄນກໍາລັງພາພຣະເຈົ້າວິເທຫະ
ຜູ້ຄອງເມືອງມິຖິລາສະເດັດໄປ
ເໝືອນທົ່ງ ໔ ຕົວກໍາລັງພາເຮົາຜູ້ຊື່ວິນີລະກະໄປ

(ພໍ່ພະຍາທົ່ງໄດ້ຟັງເລື່ອງທີ່ລູກທັງ ໔ ເລົ່າໃຫ້ຟັງແລ້ວ ກໍໂກດຮ້ອງໃສ່ລູກກາວິນີລະກະວ່າ)

[໔໐] ນີ້ເຈົ້າວິນີລະກະ ເຈົ້າມາຢູ່ອາໄສຮ່ອມພູ
ອັນບໍ່ແມ່ນພື້ນເພເດີມຂອງເຈົ້າ
ເຈົ້າຈົ່ງໄປຢູ່ອາໄສແຖວໝູ່ບ້ານເທີ້ນ
ບ່ອນນັ້ນເປັນບ່ອນຢູ່ອາໄສຂອງແມ່ເຈົ້າ

**ວິນີລະກະຊາດົກທີ ໑໐ ຈົບ**

**ທັນລະຫະວັກທີ ໑ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ຣາໂຊວາດຊາດົກ | ໒. ສິງຄາລະຊາດົກ |
| ໓. ສູກະຣະຊາດົກ | ໔. ອຸຣະຄະຊາດົກ |
| ໕. ພັກຄະຊາດົກ | ໖. ອະລີນະຈິດຕະຊາດົກ |
| ໗. ທານະຊາດົກ | ໘. ສຸຫະນຸຊາດົກ |
| ໙. ໂມຣະຊາດົກ | ໑໐. ວິນີລະກະຊາດົກ |

# ໒. ສັນຖະວະວັກ

### ໝວດວ່າດ້ວຍຄວາມສະໜິດສະໜົມ

## ໑. ອິນທະສະມານະໂຄດຕະຊາດົກ (໑໗໑)

### ວ່າດ້ວຍອິນທະສະມານະໂຄດດາບົດ

(ດາບົດໂພທິສັດບອກດາບົດທີ່ບໍ່ຄວນທຳຄວາມຄຸກຄີກັບຄົນຊົ່ວວ່າ)

[໔໑] ບຸກຄົນບໍ່ຄວນທຳຄວາມສະໜິດສະໜົມກັບຄົນຊົ່ວ
ບຸກຄົນຜູ້ປະເສີດຮູ້ປະໂຫຍດຊັດແຈ້ງຢູ່
ກໍບໍ່ຄວນທຳຄວາມສະໜິດສະໜົມກັບບຸກຄົນຜູ້ບໍ່ປະເສີດ
ເພາະວ່າ ບຸກຄົນຜູ້ບໍ່ປະເສີດເຖິງແມ່ນຈະຢູ່ຮ່ວມກັນເປັນເວລານານ
ກໍຍັງທຳຄວາມຊົ່ວເໝືອນຊ້າງໄດ້ຂ້າອິນທະສະມານະໂຄດດາບົດ

[໔໒] ບຸກຄົນຮູ້ບຸກຄົນໃດວ່າ ຜູ້ນີ້ເຊັ່ນດຽວກັບເຮົາດ້ວຍສີນ ປັນຍາ ແລະສຸຕະ
ເພິ່ງທຳໄມຕີກັບບຸກຄົນເຊັ່ນນັ້ນ
ຍ້ອນການສະມາຄົມກັບສັດຕະບຸຣຸດເປັນຄວາມສຸກໂດຍແທ້

**ອິນທະສະມານະໂຄດຕະຊາດົກທີ ໑ ຈົບ**

## ໒. ສັນຖະວະຊາດົກ (໑໗໒)

### ວ່າດ້ວຍການສະໜິດສະໜົມ

(ພາມໂພທິສັດຕົກໃຈຢ້ານທີ່ບັນສາລາຖືກໄຟໄໝ້ກ່າວວ່າ)

[໔໓] ສິ່ງອື່ນທີ່ຈະຊົ່ວຊ້າໄປກວ່າຄວາມສະໜິດສະໜົມກັບຄົນຊົ່ວບໍ່ມີ

ເພາະໄຟນີ້ອັນເຮົາໃຫ້ອີ່ມໜຳດ້ວຍເນີຍໃສແລະເຂົ້າປາຍາດແລ້ວ
ກໍຍັງເຜົາບັນສາລາທີ່ເຮົາທຳໄດ້ແສນຍາກ

(ພຣະໂພທິສັດດຳຣິວ່າ ຄວາມສະໜິດສະໜົມກັບສັດຕະບຸຣຸດເປັນສິ່ງປະເສີດ ຈຶ່ງກ່າວວ່າ)

[໔໔] ສິ່ງອື່ນທີ່ຈະປະເສີດໄປກວ່າຄວາມສະໜິດສະໜົມກັບສັດຕະບຸຣຸດບໍ່ມີ
ແມ່ເນື້ອສາມາຍັງເລຍປາກຣາດຊະສີເສືອໂຄ່ງ
ແລະເສືອເຫຼືອງໄດ້ຍ້ອນຄວາມສະໜິດສະໜົມ

**ສັນຖະວະຊາດົກທີ ໔ ຈົບ**

## ໕. ສຸສີມະຊາດົກ (໑໖໓)
## ວ່າດ້ວຍພຣະເຈົ້າສຸສີມະ

(ພາມປຸໂຣຫິດໂພທິສັດຂອງພຣະເຈົ້າສຸສີມະ ຂາບທູນເລື້ອງທີ່ໄດ້ຮູ້ຂ່າວມາວ່າ)

[໔໕] ຂ້າແດ່ ພຣະອົງຜູ້ຊົງພະນາມວ່າສຸສີມະ ຊ້າງດຳມີງາຂາວ
ຂອງພຣະອົງເຫຼົ່ານີ້ ໑໐໐ ກວ່າເຊືອກ ປະດັບດ້ວຍຕາໜ່າງຄຳ
ພຣະເຈົ້າສຸສີມະ ພຣະອົງຍັງຊົງຣະນຶກເຖິງການກະທຳຂອງພຣະຊະນົກ
ແລະພຣະໄອຍະກາຂອງພຣະອົງບໍ ຈຶ່ງຕັດວ່າ
ເຮົາຈະໃຫ້ຊ້າງເຫຼົ່ານັ້ນແກ່ພາມເຫຼົ່າອື່ນ ຂ້ານ້ອຍ

(ພຣະເຈົ້າສຸສີມະຊົງສະດັບຄຳຂອງພຣະໂພທິສັດແລ້ວຕັດວ່າ)

[໔໖] ນີ້ພໍ່ມານົບ ຊ້າງດຳມີງາຂາວຂອງເຮົາເຫຼົ່ານີ້
໑໐໐ ກວ່າເຊືອກ ປະດັບດ້ວຍຕາໜ່າງຄຳ
ເຮົາຍັງຣະນຶກເຖິງການກະທຳຂອງພຣະບິດາແລະພຣະໄອຍະກາ
ຈຶ່ງເວົ້າວ່າ ເຮົາຈະໃຫ້ຊ້າງເຫຼົ່ານັ້ນແກ່ພາມເຫຼົ່າອື່ນ

**ສຸສີມະຊາດົກທີ ໕ ຈົບ**

## ໖. ຄິດຊະຊາດົກ (໑໖໔)
## ວ່າດ້ວຍສາຍຕານົກແຮ້ງ

(ພຣະເຈົ້າພົມມະທັດຕັດຖາມພະຍາແຮ້ງໂພທິສັດວ່າ)

[໔໗] ທຳມະດານົກແຮ້ງຍ່ອມເຫັນຊາກສົບໄດ້ໄກເຖິງຮ້ອຍໂຍດບໍ່ແມ່ນບໍ
ຍ້ອນເຫດໃດ ເຈົ້າແມ່ນມາໃກ້ຕາໜ່າງແລະບ້ວງແລ້ວກໍບໍ່ຮູ້

(ພະຍາແຮ້ງໂພທິສັດຂາບທູນວ່າ)

[໔໘] ເມື່ອໃດສັດມີຄວາມເສື່ອມໃນຂະນະຈະສິ້ນຊີວິດ
ເມື່ອນັ້ນເຖິງຈະມາໃກ້ຕາໜ່າງແລະບ້ວງກໍບໍ່ຮູ້

**ຄິດຊະຊາດົກທີ ໔ ຈົບ**

## ໕. ນະກຸລະຊາດົກ (໑໖໕)
## ວ່າດ້ວຍພັງພອນ

(ລືສີໂພທິສັດເຫັນພັງພອນກັບມາ ຈຶ່ງກ່າວວ່າ)

[໔໙] ນີ້ເຈົ້າພັງພອນຜູ້ເກີດໃນທ້ອງ
ທ່ານເຊື່ອມສຳພັນກັບງູທີ່ເປັນສັດຕູ
ຍັງຈະນອນຫຍິ້ງແຂ້ວຢູ່ ໄພນັ້ນມີມາແຕ່ໄສນໍ

(ພັງພອນຕອບວ່າ)

[໕໐] ໃນສັດຕູບຸກຄົນເພິ່ງຣະແວງໄວ້ກ່ອນ ແມ່ນໃນມິດກໍບໍ່ເພິ່ງວາງໃຈ
ໄພທີ່ເກີດຂຶ້ນຈາກຄົນບໍ່ມີໄພຍ່ອມກັດກິນໄດ້ເລິກຈົນເຖິງເຫງົ້າຮາກ

**ນະກຸລະຊາດົກທີ ໕ ຈົບ**

## ໖. ອຸປະສາລະຫະກະຊາດົກ (໑໖໖)
## ວ່າດ້ວຍພາມອຸປະສາລະຫະກະ

(ພາມໂພທິສັດຕອບບັນຫາຂອງມານົບ ກຳນົດດ້ວຍປຸບເພນິວາສະຍານແລ້ວ ຈຶ່ງກ່າວວ່າ)

[໕໑] ພາມຊື່ອຸປະສາລະຫະກະ ຈຳນວນ ໑໔,໐໐໐ ຄົນ
ໄດ້ຖືກພວກຍາດເຜົາໃນສະຖານທີ່ນີ້
ສະຖານທີ່ບໍ່ເຄີຍມີຄົນຕາຍບໍ່ມີໃນໂລກ

[໕໔] ສັດຈະ ທຳມະ ອະຫິງສາ

ສັນຍະມະ ແລະທະມະມີຢູ່ໃນຜູ້ໃດ
ພຣະອະຣິຍະເຈົ້າທັງຫຼາຍຍ່ອມຄົບຫາບຸກຄົນເຊັ່ນນັ້ນ
(ເພາະ) ຄຸນນະທຳຊື່ວ່າບໍ່ຕາຍໃນໂລກ

**ອຸປະສາລະຫະກະຊາດົກທີ ໖ ຈົບ**

## ໗. ສະມິດທິຊາດົກ (໑໕໗)
## ວ່າດ້ວຍເທບທິດາຫຼົງຮັກພຣະສະມິດທິໂພທິສັດ

(ເທບທິດາປະເລົ້າປະໂລມພາມໂພທິສັດວ່າ)

[໓໓] ພິກຂຸ ທ່ານຍັງບໍ່ໄດ້ບໍຣິໂພກກາມມະຄຸນເລີຍ
ກັບມາທ່ຽວພິກຂາຈານແນວນີ້
ກໍທ່ານບໍຣິໂພກກາມມະຄຸນສາກ່ອນແລ້ວ
ຈຶ່ງທ່ຽວພິກຂາຈານຈະບໍ່ດີກວ່າບໍ
ພິກຂຸ ທ່ານຈົ່ງບໍຣິໂພກກາມມະຄຸນສາກ່ອນເທີ້ນ
ແລ້ວຈຶ່ງທ່ຽວພິກຂາຈານ
ຂໍເວລາບໍຣິໂພກກາມມະຄຸນຢ່າໄດ້ລ່ວງຜ່ານທ່ານໄປເລີຍ

(ພາມໂພທິສັດກ່າວຄາຖາທີ ໔ ວ່າ)

[໓໔] ເຮົາບໍ່ຮູ້ເວລາຕາຍຂອງຕົນເລີຍ
ເວລາຕາຍປິດບັງຢູ່ຍັງບໍ່ຜາກົດ
ເພາະສະນັ້ນ ເຮົາຈຶ່ງບໍ່ບໍຣິໂພກກາມມາທ່ຽວພິກຂາຈານຢູ່
ຂໍເວລາພ່ຳເພັງສະມະນະທຳຢ່າໄດ້ລ່ວງຜ່ານເຮົາໄປເລີຍ

**ສະມິດທິຊາດົກທີ ໗ ຈົບ**

## ໘. ສະກຸນັກຄີຊາດົກ (໑໕໘)
## ວ່າດ້ວຍແຫຼວນົກເຂົາຫຼົງກົນນົກຂີ້ໄຖ

(ພຣະສາດສະດາຊົງສະແດງເລື້ອງແຫຼວນົກເຂົາກັບນົກຂີ້ໄຖໃນອະດີດແລ້ວຕັດເລື້ອງໂຄຈອນຂອງພິກຂຸວ່າ)

[໓໕] ແຫຼວນົກເຂົາເອີ່ນລົງເຕັມແຮງດ້ວຍໝາຍໃຈວ່າ

ຈະຈັບເອົານົກຂີ້ໄຖທີ່ຢູ່ໃນຖິ່ນຫາກິນ
ເວີນລົງຢ່າງໄວ
ຍ້ອນເຫດນັ້ນ ຈຶ່ງເຖິງຄວາມຕາຍ

(ເມື່ອແຫຼວຕາຍແລ້ວ ນົກຂີ້ໄຖຈຶ່ງອອກມາຢືນເທິງເອິກຂອງແຫຼວເປ່ງອຸທານວ່າ)

[໔໖] ເຮົານັ້ນເປັນຜູ້ເຖິງພ້ອມດ້ວຍອຸບາຍ
ຍິນດີແລ້ວໃນທີ່ຫາກິນອັນເປັນເຂດແຫ່ງບິດາ
ເຫັນປະໂຫຍດຂອງຕົນຢູ່
ເປັນຜູ້ປາສະຈາກສັດຕູ ຍ່ອມເບີກບານໃຈ

**ສະກຸນັກຄິຊາດົກທີ ໘ ຈົບ**

## ໙. ອະຣະກະຊາດົກ (໑໖໙)

## ວ່າດ້ວຍສາດສະດາອະຣະກະສອນການແຜ່ເມດຕາ

(ພາມໂພທິສັດບວດເປັນລືສີ ເມື່ອຈະສອນໝູ່ລືສີ ຈຶ່ງໄດ້ປະກາດອານິສົງຂອງເມດຕາວ່າ)

[໔໗] ຜູ້ໃດອະນຸເຄາະຊາວໂລກທັງມວນດ້ວຍເມດຕາຈິດຫາປະມານບໍ່ໄດ້
ທັງເບື້ອງເທິງ ເບື້ອງຕ່ຳ ແລະເບື້ອງຂວາງໂດຍປະການທັງປວງ

[໔໘] ຈິດເກື້ອກູນຫາປະມານບໍ່ໄດ້ ເປັນຈິດບໍລິບູນອັນຜູ້ນັ້ນອົບຮົມດີແລ້ວ
ກຳໃດທີ່ເຂົາພໍ່າເພັງແລ້ວພໍປະມານ
ກຳນັ້ນຈັກບໍ່ເຫຼືອຢູ່ໃນຈິດຂອງເຂົານັ້ນ

**ອະຣະກະຊາດົກທີ ໙ ຈົບ**

## ໑໐. ກະກັນຕະກະຊາດົກ (໑໗໐)

## ວ່າດ້ວຍກະປອມໄດ້ຊັບ

(ພຣະຣາຊາຊົງທອດພຣະເນດກິຣິຍາຂອງກະປອມນັ້ນ ເຊິ່ງບໍ່ນອບນ້ອມເໝືອນກ່ອນ ຈຶ່ງຕັດຖາມວ່າ)

[໔໙] ກະປອມເທິງຍອດເສົາຄ້າຍຕົວນີ້ບໍ່ລົງມາອ່ອນນ້ອມເໝືອນວັນກ່ອນ
ທ່ານມະໂຫສົດບັນດິດ ທ່ານຮູ້ບໍວ່າ

ກະປອມກາຍເປັນສັດກະດ້າງກະເດື່ອງໄປຍ້ອນເຫດໃດ

[໔໐] ກະປອມໄດ້ຊັບເຄິ່ງມາສິກເຊິ່ງຕົນບໍ່ເຄີຍໄດ້ມາກ່ອນ
ຈຶ່ງດູໝິ່ນພຣະເຈົ້າວິເທຫະຜູ້ຄອງເມືອງມິຖິລາ

**ກະກັນຕະກະຊາດົກທີ ໑໐ ຈົບ**

**ສັນຖະວະວັກທີ ໔ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ອິນທະສະມານະໂຄດຕະຊາດົກ
໒. ສຸສີມະຊາດົກ
໓. ນະກຸລະຊາດົກ
໗. ສະນິດທິຊາດົກ
໙. ອະຣະກະຊາດົກ
໔. ສັນຖະວະຊາດົກ
໕. ຄິດຊະຊາດົກ
໖. ອຸປະສາລະຫະກະຊາດົກ
໘. ສະກຸນັກຄິຊາດົກ
໑໐. ກະກັນຕະກະຊາດົກ

# ໒. ກັນລະຍານະວັກ

## ໝວດວ່າດ້ວຍກັນລະຍານະທຳ

## ໑. ກັນລະຍານະທຳມະຊາດົກ (໑໗໑)
## ວ່າດ້ວຍຜູ້ມີກັນລະຍານະທຳ

(ເສດຖີໂພທິສັດທູນຂໍພຣະບໍຣົມຣາຊານຸຍາດບວດວ່າ)

[໔໑] ຂ້າແດ່ ພຣະອົງຜູ້ຈອມຊົນ ໃນການໃດ
ບຸກຄົນໄດ້ຮັບສົມຍາວ່າ ຜູ້ມີກັນລະຍານະທຳໃນໂລກ
ໃນການນັ້ນນໍຣະຊົນຜູ້ມີປັນຍາບໍ່ຄວນໃຫ້ຕົນເສື່ອມຈາກສົມຍານັ້ນ
ທຳມະດາສັດຕະບຸຣຸດຖືເອົາສົມຍານັ້ນເປັນທຸຣະສຳຄັນແມ່ນດ້ວຍຫິຣິ

[໔໒] ຂ້າແດ່ ພຣະອົງຜູ້ຈອມຊົນ
ສົມຍາວ່າຜູ້ມີກັນລະຍານະທຳໃນໂລກ
ຂ້າພຣະອົງໄດ້ຮັບແລ້ວໃນວັນນີ້

ຂ້າພຣະອົງພິຈາລະນາເຖິງສົມຍານັ້ນຢູ່ຈັກຂໍບວດໃນວັນນີ້
ເພາະຂ້າພຣະອົງບໍ່ມີຄວາມພໍໃຈໃນການບໍຣິໂພກກາມມະຄຸນໃນໂລກນີ້

**ກັນລະຍານະທຳຊາດົກທີ ໑ ຈົບ**

## ໔. ທັດທະຣະຊາດົກ (໑໗໔)

## ວ່າດ້ວຍຣາດຊະສີກັບໝາຈອກຢູ່ພູເງິນ

(ລູກຣາດຊະສີໂພທິສັດໄດ້ຍິນສຽງໝາຈອກ ຈຶ່ງຖາມບິດາວ່າ)

[໔໓] ຂ້າແດ່ ພໍ່ຜູ້ເປັນໃຫຍ່ກວ່າເນື້ອທັງຫຼາຍ
ໃຜນໍສົ່ງສຽງຮ້ອງດັງ ບັນລືລັ່ນກ້ອງທົ່ວພູເງິນ
ສີຫະທັງຫຼາຍກໍບໍ່ກ້າຮ້ອງໂຕ້ຕອບມັນ
ມັນເປັນສັດປະເພດໃດ?

(ພໍ່ຣາດຊະສີໂພທິສັດຟັງຄຳຂອງລູກແລ້ວ ຈຶ່ງກ່າວວ່າ)

[໔໔] ລູກເອີຍ ມັນຄືໝາຈອກ
ເປັນສັດຕ່ຳຊາມກວ່າເນື້ອທັງຫຼາຍທີ່ກຳລັງຫອນຢູ່
ສີຫະທັງຫຼາຍຣັງກຽດຊາດຂອງມັນຈຶ່ງນັ່ງນິ່ງເສີຍຢູ່

**ທັດທະຣະຊາດົກທີ ໔ ຈົບ**

## ໓. ມັກກະຕະຊາດົກ (໑໗໓)

## ວ່າດ້ວຍລີງປອມເປັນດາບົດ

(ດາບົດກຸມານເຫັນລີງປອມເປັນດາບົດແກ່ໜາວສັ່ນຢູ່ບໍ່ຮູ້ວ່າເປັນລີງ ຄິດຈະໃຫ້ເຂົ້າໄປຜີງໄຟໃນປັນນະສາລາ ຈຶ່ງເວົ້າກັບບິດາວ່າ)

[໔໕] ຂ້າແດ່ພໍ່ ພຣະດາບົດຕົນນັ້ນຢືນອີງຕົ້ນຕານຢູ່
ອາສົມຂອງເຮົານີ້ກໍມີຢູ່ ເຮົາໃຫ້ອາສົມເພື່ອໃຫ້ເຂົາຢູ່ເທີ້ນ

(ດາບົດບິດາໂພທິສັດຟັງຄຳຂອງລູກແລ້ວ ຈຶ່ງກ່າວວ່າ)

[໔໖] ລູກເອີຍ ເຈົ້າຢ່າຮຽກມັນມາເລີຍ
ມັນເຂົ້າມາແລ້ວຈະທຳລາຍອາສົມຂອງເຮົາ

ໜ້າຕາຂອງພາມຜູ້ມີສິນບໍ່ໄດ້ເປັນເຊັ່ນນັ້ນດອກ

**ມັກກະຕະຊາດົກທີ ໓ ຈົບ**

## ໔. ທຸບພິຍະມັກກະຕະຊາດົກ (໑໗໔)
## ວ່າດ້ວຍລີງຜູ້ມັກປະທຸດສະຮ້າຍມິດ

(ພາມໂພທິສັດເຫັນກິຣິຍາຂອງລີງ ຈຶ່ງກ່າວຕິຕຽນວ່າ)

[໔໗] ເຮົາໄດ້ໃຫ້ນ້ຳພຽງພໍແກ່ເຈົ້າຜູ້ຖືກຄວາມຮ້ອນ
ໃນລະດູຮ້ອນແຜດເຜົາ ກະຫາຍຢູ່
ບັດນີ້ ເຈົ້າດື່ມແລ້ວຍັງສົ່ງສຽງຮ້ອງຈົ້ກ ໆ ຢູ່ອີກ
ການຄົບຫາກັບຄົນຊົ່ວບໍ່ປະເສີດເລີຍ

(ລີງຜູ້ມັກປະທຸດສະຮ້າຍມິດໄດ້ຟັງດັ່ງນັ້ນ ຈຶ່ງກ່າວຜູກອາຄາດວ່າ)

[໔໘] ທ່ານເຄີຍໄດ້ຍິນຫຼືເຄີຍໄດ້ເຫັນມາແດ່ບໍວ່າ
ລີງຕົວໃດທີ່ຊື່ວ່າເປັນສັດມີສິນ
ບັດນີ້ ເຮົາຈະຖ່າຍອຸດຈາຣະຫົດຫົວທ່ານ
ນີ້ເປັນທຳມະດາຂອງເຮົາ

**ທຸບພິຍະມັກກະຕະຊາດົກທີ ໔ ຈົບ**

## ໕. ອາທິດຈຸປັດຖານະຊາດົກ (໑໗໕)
## ວ່າດ້ວຍລີງໄຫວ້ພຣະອາທິດ

(ພວກມະນຸດເຫັນກິຣິຍາຂອງລີງຜູ້ເຮັດເປັນເໝືອນພໍ່າເພັງຕະບະແລະເໝືອນຈຳສິນ ຈຶ່ງກ່າວສັນເສີນວ່າ)

[໔໙] ເລົ່າກັນມາວ່າ ບັນດາສັດທັງມວນ ສັດທີ່ຕັ້ງໝັ້ນຢູ່ໃນສິນມີຢູ່
ທ່ານຈົ່ງເບິ່ງລີງສາຂະຜູ້ຕ່ຳຊາມ ມັນຢືນໄຫວ້ພຣະອາທິດຢູ່

(ລືສີໂພທິສັດເຫັນພວກມະນຸດພາກັນສັນເສີນລີງ ຈຶ່ງກ່າວເຕືອນວ່າ)

[໕໐] ທ່ານທັງຫຼາຍບໍ່ຮູ້ປົກກະຕິຂອງມັນ
ເພາະບໍ່ຮູ້ຈຶ່ງພາກັນສັນເສີນ

ໂຮງໄຟກໍຖືກມັນເຜົາ
ແລະຄົນໂທນໍ້າ ໔ ໜ່ວຍກໍຖືກມັນທຳລາຍ

**ອາທິດຈຸປັດຖານະຊາດົກທີ ໕ ຈົບ**

## ໖. ກະລາຍະມຸດຖິຊາດົກ (໑໗໖)
## ວ່າດ້ວຍລິງຊັດໝາກເດືອຍຖິ້ມທັງກຳມື

(ອຳມາດໂພທິສັດຜູ້ສຳເລັດຣາດຊະກິດຂາບທູນເຖິງຄວາມປະພຶດຂອງລິງວ່າ)

[໕໑] ຂ້າແດ່ ພຣະອົງຜູ້ຈອມຊົນ ລິງທີ່ຫ່ຽວໄປຕາມງ່າໄມ້ນີ້
ເປັນລິງໂງ່ແທ້ ໆ ລິງຕົວນີ້ບໍ່ມີປັນຍາ
ມັນຊັດໝາເດືອຍກຳມືໜຶ່ງຈົນໝົດ
ແລ້ວຫ່ຽວຫາໝາກເດືອຍທີ່ຕົກລົງໄປສູ່ພື້ນດິນກິນເທື່ອລະເມັດ

(ເມື່ອພຣະໂພທິສັດຂາບທູນຢ່າງນີ້ແລ້ວ ຈຶ່ງຂາບທູນວ່າ)

[໕໒] ຂ້າແດ່ມະຫາຣາດ ພວກເຮົາກໍດີ ຊົນເຫຼົ່າອື່ນກໍດີ
ທີ່ມີຄວາມໂລບຫຼາຍ ຈະເສື່ອມຈາກປະໂຫຍດສ່ວນຫຼາຍ
ເພາະປະໂຫຍດສ່ວນນ້ອຍເໝືອນລິງເສື່ອມຈາກໝາກເດືອຍ

**ກະລາຍະມຸດຖິຊາດົກທີ ໖ ຈົບ**

## ໗. ຕິນທຸກະຊາດົກ (໑໗໗)
## ວ່າດ້ວຍອຸບາຍກິນໝາກພັບ

(ຝູງລິງ ໘໐,໐໐໐ ຕົວເຫັນພວກມະນຸດ ຕົກໃຈຢ້ານຕາຍ ຈຶ່ງໄປບອກພະຍາວານອນໂພທິສັດ ວ່າ)

[໕໓] ພວກມະນຸດຖືຄັນທະນູແລະກຳລູກທະນູ ຖືດາບອັນຄົມ
ພາກັນລ້ອມພວກເຮົາໄວ້ ເຮົາຈັກພົ້ນໄດ້ແນວໃດນໍ

(ພະຍາວານອນໂພທິສັດໄດ້ຟັງຄຳຂອງພວກລິງແລ້ວໄດ້ປອບວ່າ)

[໕໔] ພວກມະນຸດມີວຽກງານຫຼາຍ
ປະໂຫຍດບາງຢ່າງຈະເພິ່ງເກີດຂຶ້ນຢ່າງແນ່ນອນ

ເວລາທີ່ຈະຊ່ວງຊີງເອົາໝາກໄມ້ຍັງມີຢູ່
ພວກທ່ານຈົ່ງຫຍໍ້າກິນໝາກພັບນັ້ນເທີ້ນ

**ຕິນທຸກະຊາດົກທີ ໗ ຈົບ**

## ໘. ກັດສະປະຊາດົກ (໑໗໘)
## ວ່າດ້ວຍເຕົ່າສອນທຳ

(ເຕົ່າຖືກຊ່າງໝໍ້ໂພທິສັດໃຊ້ຈົກຂຸດຖິ້ມໄວ້ເທິງບົກໄດ້ຮັບເວທະນາ ຈຶ່ງໄດ້ເວົ້າຄໍ່າຄວນວ່າ)

[໕໕] ບໍ່ຕົມນີ້ເປັນບ່ອນເກີດເປັນບ່ອນເຕີບໃຫຍ່ຂອງເຮົາ
ຍ້ອນເຫດນັ້ນ ເຮົາຈຶ່ງໄດ້ອາໄສຢູ່ໃນບໍ່ຕົມ
ບໍ່ຕົມຈຶ່ງໄດ້ທັບຖົມເຮົານັ້ນໃຫ້ທຸບພົນລະພາບ
ທ່ານພັກຄະ ຍ້ອນເຫດນັ້ນ ທ່ານຈົ່ງຟັງຄໍາຂອງເຮົາ
ເຮົາຈະກ່າວກັບທ່ານ

[໕໖] ໃນບ້ານກໍຕາມ ໃນປ່າກໍຕາມ
ສະຖານທີ່ໃດບຸກຄົນໄດ້ຮັບຄວາມສຸກ
ສະຖານທີ່ນັ້ນເປັນບ່ອນເກີດເປັນບ່ອນຈະເລີນເຕີບໃຫຍ່
ຂອງຄົນທີ່ຮູ້ຈັກເຫດອັນຄວນແລະບໍ່ຄວນ
ບຸກຄົນມີຊີວິດຢູ່ໄດ້ໃນສະຖານທີ່ໃດ ເພິ່ງໄປໃນສະຖານທີ່ນັ້ນ
ບໍ່ເພິ່ງໃຫ້ບ່ອນຢູ່ທໍາລາຍຕົນເລີຍ

**ກັດສະປະຊາດົກທີ ໘ ຈົບ**

## ໙. ສະຕະທຳມະຊາດົກ (໑໗໙)
## ວ່າດ້ວຍສະຕະທຳມານົບ

(ມານົບຜູ້ຖືຊາດສະກຸນບໍຣິໂພກອາຫານທີ່ເປັນເງື່ອນນແລ້ວຄໍ່າຄວນວ່າ)

[໕໗] ອາຫານທີ່ເຮົາບໍຣິໂພກແລ້ວນັ້ນເປັນຂອງໜ້ອຍເປັນເງື່ອນນ
ແລະເຂົາໃຫ້ອາຫານນັ້ນແກ່ເຮົາໂດຍຍາກແສນຍາກ
ເຮົານັ້ນເກີດເປັນພາມ ຍ້ອນເຫດນັ້ນ
ອາຫານທີ່ເຮົາບໍຣິໂພກເຂົ້າໄປແລ້ວຈຶ່ງໄດ້ຮາກອອກມາ

(ພຣະສາດສະດາຊົງສະແດງເລື້ອງອະດີດນີ້ແລ້ວ ຕັດເຕືອນພິກຂຸທັງຫຼາຍວ່າ)

[໕໗] ຜູ້ໃດປະຖິ້ມທຳ ມີຊີວິດຢູ່ໂດຍອະທຳ
ຜູ້ນັ້ນຍ່ອມບໍ່ເພີດເພີນຍິນດີລາບແມ່ນທີ່ຕົນໄດ້ມາແລ້ວ
ເໝືອນສະຕະທຳພາມ

**ສະຕະທຳມະຊາດົກທີ ໙ ຈົບ**

## ໑໐. ທຸດທະທະຊາດົກ (໑໗໐)
## ວ່າດ້ວຍສັດຕະບຸຣຸດໃຫ້ທານທີ່ໃຫ້ໄດ້ຍາກ

(ລືສີໂພທິສັດກ່າວສັນເສີນທານທີ່ທາຍົກຖວາຍດ້ວຍຈິດເຫຼື້ອມໃສມີຜົນຫຼາຍແລ້ວ ຈຶ່ງອະນຸໂມທະນາວ່າ)

[໕໙] ອະສັດຕະບຸຣຸດທັງຫຼາຍເມື່ອຈະໃຫ້ທານຊື່ວ່າໃຫ້ໄດ້ຍາກ
ເມື່ອຈະເຮັດກຳທີ່ດີກໍ່ຊື່ວ່າເຮັດໄດ້ຍາກ
ທຳຂອງສັດຕະບຸຣຸດທັງຫຼາຍພວກອະສັດຕະບຸຣຸດຮູ້ໄດ້ຍາກ
ແລະພວກອະສັດຕະບຸຣຸດກໍເຮັດຕາມໄດ້ຍາກ

[໖໐] ເພາະສະນັ້ນ ສັດຕະບຸຣຸດແລະອະສັດຕະບຸຣຸດ
ຈຶ່ງມີຄະຕິທີ່ໄປຈາກໂລກນີ້ຕ່າງກັນ ຄື
ພວກອະສັດຕະບຸຣຸດຍ່ອມໄປສູ່ນະຣົກ
ພວກສັດຕະບຸຣຸດຍ່ອມໄປສູ່ສະຫວັນ

**ທຸດທະທະຊາດົກທີ ໑໐ ຈົບ**

**ກັນລະຍານະວັກທີ ໒ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

# ໔. ອະສະທິສະວັກ

## ໝວດວ່າດ້ວຍອະສະທິສະກຸມານ

## ໑. ອະສະທິສະຊາດົກ (໑໗໑)

## ວ່າດ້ວຍອະສະທິສະກຸມານ

(ພຣະສາດສະດາຕັດເລົ່າເລື່ອງອະສະທິສະຣາດຊະກຸມານໂພທິສັດ ຊຶ່ງຂັບພຣະຣາຊາເຈັດພຣະນະຄອນໃຫ້ໜີໄປ ເມື່ອໄດ້ໄຊຊະນະແລ້ວ ໄດ້ບວດເປັນລືສີກັບພິກຂຸທັງຫຼາຍ ຈຶ່ງຕັດພຣະຄາຖາເຫຼົ່ານີ້ວ່າ)

[໓໑] ອະສະທິສະຣາດຊະບຸດຊຶ່ງເປັນນັກແມ່ນທະນູ
ມີພະລັງຫຼາຍ ຍິງໄດ້ໄກ ຍິງໄດ້ຢ່າງວ່ອງໄວ
ແລະແມ່ນຍຳ ທຳລາຍເປົ້າໃຫຍ່ ໆ ໄດ້

[໓໔] ພຣະອົງຊຶ່ງເຮັດການຣົບໃຫ້ຂ້າເສິກທັງໝົດໜີໄປ
ໂດຍບໍ່ບຽດບຽນໃຜ ໆ
ຊ່ອຍພຣະອະນຸຊາໃຫ້ເຖິງຄວາມປອດໄພແລ້ວ
ຊຶ່ງເຂົ້າເຖິງຄວາມສັງລວມ

**ອະສະທິສະຊາດົກທີ ໑ ຈົບ**

## ໔. ສັງຄາມາວະຈະຣະຊາດົກ (໑໗໔)

## ວ່າດ້ວຍຊ້າງເຂົ້າສູ່ສົງຄາມ

(ພຣະໂພທິສັດຜູ້ເປັນຄົນເຝິກຊ້າງຂອງພຣະຣາຊາສອນຊ້າງວ່າ)

[໓໓] ພະຍາກຸນຊອນ ທ່ານໄດ້ຊື່ວ່າຊຳນານສົງຄາມ ກ້າຫານ ມີກຳລັງຫຼາຍ
ເປັນຫຍັງນໍ ມາໃກ້ເຂື່ອນປະຕູແລ້ວຈຶ່ງຖອຍກັບແນວນີ້

[໓໔] ພະຍາກຸນຊອນ ທ່ານຈົ່ງຫັກຫຼົ້ມໄລກອນ ຈົ່ງຖອນເສົາຣະບຽດ
ຈົ່ງຢຽບທຳລາຍຊຸ້ມປະຕູ ແລະຈົ່ງເຂົ້າໄປໃນເມືອງໂດຍໄວເທີ້ນ

**ສັງຄາມາວະຈະຣະຊາດົກທີ ໔ ຈົບ**

# ໓. ວາໂລທະກະຊາດົກ (໑໘໓)
## ວ່າດ້ວຍລາກິນນ້ຳຫາງ

(ພຣະຣາຊາຕັດຮຽກອຳມາດໂພທິສັດຜູ້ຢູ່ໃກ້ມາ ຕັດຖາມກິຣິຍາຂອງພວກລາວ່າ)

[໕໕] ເພາະດື່ມນ້ຳຫາງອັນມີຣົດຊາດໜ້ອຍ ອັນເປັນນ້ຳບໍ່ສະອາດ
ຄວາມເມົາຈຶ່ງເກີດແກ່ພວກລາ
ແຕ່ຄວາມເມົາກໍບໍ່ເກີດຂຶ້ນແກ່ມ້າສິນທົບ
ເພາະດື່ມນ້ຳມີຣົດຊາດອັນປະນີດ

(ພຣະໂພທິສັດຂາບທູນວ່າ)

[໕໖] ຂ້າແດ່ພ ຣະອົງຜູ້ເປັນຈອມຊົນ ລານັ້ນມີຊາດຊົ່ວຊາມ
ດື່ມນ້ຳມີຣົດໜ້ອຍ ອັນຣົດນັ້ນຖືກຕ້ອງແລ້ວຍ່ອມເມົາ
ສ່ວນມ້າສິນທົບເກີດໃນຕະກູນ ມີປົກກະຕິນຳພາທຸຣະ
ດື່ມນ້ຳມີຣົດອັນເລີດແລ້ວ ກໍບໍ່ເມົາ

**ວາໂລທະກະຊາດົກທີ ໓ ຈົບ**

# ໔. ຄິຣິທັດຕະຊາດົກ (໑໘໔)
## ວ່າດ້ວຍມ້າຮຽນແບບນາຍຄິຣິທັດ

(ອຳມາດໂພທິສັດກວດເບິ່ງອາການຂອງມ້າພິການແລ້ວ ຂາບທູນພຣະຣາຊາວ່າ)

[໕໗] ມ້າ ມຸງຄຸນຊື່ປັນຖະວະຂອງພຣະເຈົ້າສາມະ
ຖືກນາຍຄິຣິທັດປະທຸດສະຮ້າຍແລ້ວ
ຈຶ່ງລະປົກກະຕິເດີມຂອງຕົນ ຮຽນແບບນາຍຄິຣິທັດນັ້ນ

(ພຣະໂພທິສັດຂາບທູນໃຫ້ຫາຄົນລ້ຽງມ້າທີ່ດີມາວ່າ)

[໕໘] ຖ້າຄົນປະກອບດ້ວຍອາການອັນງົດງາມທີ່ສົມຄວນແກ່ມ້ານັ້ນ
ເພິ່ງຈັບມ້ານັ້ນທີ່ບັງຫຽນ ແລ້ວຈູງໄປຮອບ ໆ ສະນາມມ້າແລ້ວ
ມ້ານັ້ນຈະລະອາການຂາດ້ຽງແລ້ວຮຽນແບບຄົນລ້ຽງມ້ານັ້ນທັນທີ

**ຄິຣິທັດຕະຊາດົກທີ ໔ ຈົບ**

## ໕. ອະນະພິຣະຕິຊາດົກ (໑໗໕)
## ວ່າດ້ວຍຈິດຂຸ່ນມົວແລະບໍ່ຂຸ່ນມົວ

(ອາຈານທິສາປາໂມກໂພທິສັດຖາມມານົບຜູ້ເປັນສິດເຖິງສາເຫດທີ່ມົນເສື່ອມຫາຍໄປແລ້ວ ຈຶ່ງ ກ່າວວ່າ)

[໖໙] ເມື່ອນ້ຳຂຸ່ນ ບໍ່ໃສ ບຸກຄົນຍ່ອມບໍ່ເຫັນຫອຍໂຂ່ງ ຫອຍກາບ
ກ້ອນຫີນນ້ອຍ ເມັດຊາຍ ແລະຝູງປາ ສັນໃດ
ເມື່ອຈິດຂຸ່ນມົວ ບຸກຄົນກໍຍ່ອມບໍ່ເຫັນປະໂຫຍດຕົນ
ແລະປະໂຫຍດຜູ້ອື່ນ ສັນນັ້ນ

[໗໐] ເມື່ອນ້ຳໃສສະອາດ ບຸກຄົນຍ່ອມເຫັນຫອຍໂຂ່ງ ຫອຍກາບ
ກ້ອນຫີນນ້ອຍ ເມັດຊາຍ ແລະຝູງປາ ສັນໃດ
ເມື່ອຈິດບໍ່ຂຸ່ນມົວ ບຸກຄົນກໍຍ່ອມເຫັນປະໂຫຍດຕົນ
ແລະປະໂຫຍດຜູ້ອື່ນ ສັນນັ້ນ

**ອະນະພິຣະຕິຊາດົກທີ ໕ ຈົບ**

## ໖. ທະທິວາຫະນະຊາດົກ (໑໗໖)
## ວ່າດ້ວຍພຣະເຈົ້າທະທິວາຫະນະ

(ພຣະເຈົ້າທະທິວາຫະນະຕັດຖາມພຣະໂພທິສັດວ່າ)

[໗໑] ໃນການກ່ອນ ໝາກມ່ວງນີ້ມີສີວງາມ ກິ່ນຫອມ
ຣົດແຊບ ໄດ້ຮັບການບຳຣຸງຄືເກົ່າ
ຍ້ອນເຫດໃດ ຈຶ່ງກັບກາຍເປັນໝາກມ່ວງທີ່ມີຣົດຂົມໄປໄດ້

(ອຳມາດໂພທິສັດຂາບທູນແຈ້ງເຫດຂອງໝາກມ່ວງນັ້ນວ່າ)

[໗໒] ຂ້າແດ່ພຣະເຈົ້າ ທະທິວາຫະນະ
ໝາກມ່ວງຂອງພຣະອົງມີຕົ້ນກະເດົາອ້ອມຮອບ
ຮາກກັບຮາກກ່ຽວພັນກັນ ງ່າກັບງ່າປະສານກັນ
ຍ້ອນການກ່ຽວຂ້ອງກັບຕົ້ນໄມ້ທີ່ມີຣົດຂົມບໍ່ໜ້າພໍໃຈນັ້ນ
ໝາກມ່ວງຕົ້ນນີ້ຈຶ່ງກາຍເປັນໄມ້ທີ່ມີຣົດຂົມໄປ

**ທະທິວາຫະນະຊາດົກທີ ໖ ຈົບ**

## ໑. ຈະຕຸມັດຖະຊາດົກ (໑໗໑)
## ວ່າດ້ວຍໝາຈອກມີເພດຊົ່ວຊ້າ ໔ ປະການ

(ຣຸກຂະເທວະດາໂພທິສັດສົນທະນາກັບພະຍາຫົງວ່າ)

[໑໓] ທ່ານທັງ ໔ ພາກັນຂຶ້ນໄປສູ່ຄ່າຄົບໄມ້
ຢູ່ໃນບ່ອນລັບແລ້ວເປີກສາກັນເທິງຕົ້ນໄມ້ສູງ
ເຊີນທ່ານລົງມາເປີກສາກັນຂ້າງລຸ່ມນີ້ເທີ້ນ
ພະຍາເນື້ອຈະໄດ້ຟັງນໍາ

(ໃນເວລາທີ່ລູກຫົງ ໔ ຕົວຮັງກຽດໝາຈອກແລ້ວພາກັນບິນກັບໄປ ພຣະໂພທິສັດ ຈຶ່ງກ່າວວ່າ)

[໑໔] ຄຸດກັບຄຸດເພິ່ງເປີກສາກັນ
ເທວະດາກັບເທວະດາເພິ່ງເປີກສາກັນ
ເລື້ອງນັ້ນຈະມີປະໂຫຍດອັນໃດແກ່ໝາຈອກຊົ່ວຊ້າ ໔ ປະການ
ນີ້ໝາຈອກຊົ່ວຊ້າ ເຈົ້າຈົ່ງກັບເຂົ້າໂພ້ງໄປເທີ້ນ

**ຈະຕຸມັດຖະຊາດົກທີ ໑ ຈົບ**

## ໒. ສີຫະໂກດຖຸຊາດົກ (໑໗໒)
## ວ່າດ້ວຍຕົວເໝືອນຣາດຊະສີແຕ່ສຽງບໍ່ຄື

(ລູກຣາດຊະສີໂພທິສັດໂຕໜຶ່ງໄດ້ຍິນສຽງລູກຂອງໝາຈອກ ຈຶ່ງຖາມພໍ່ວ່າ)

[໑໕] ຣາດຊະສີໂຕນັ້ນມີນິ້ວຄືຣາດຊະສີ ມີເລັບຄືຣາດຊະສີ
ຢືນຢູ່ດ້ວຍຂາຣາດຊະສີພຽງໂຕດຽວທີ່ນັ້ນໃນໝູ່ຣາດຊະສີ
ແຕ່ບັນລືສຽງພ້ຽນເປັນແນວອື່ນ

(ຣາດຊະສີໂພທິສັດບອກໃຫ້ລູກ ໆ ຮູ້ວ່າເປັນອ້າຍນ້ອງກັນ ຈຶ່ງສອນລູກໝາຈອກວ່າ)

[໑໖] ນີ້ເຈົ້າລູກຣາດຊະສີ ເຈົ້າຢ່າບັນລືສຽງອີກເລີຍ
ຈົ່ງງຽບສຽງຢູ່ໃນປ່າເທີ້ນ
ພວກເຂົາຈະເພິ່ງຮູ້ຈັກເຈົ້າດ້ວຍສຽງນັ້ນ
ເພາະສຽງຂອງເຈົ້າບໍ່ຄືກັບສຽງຂອງພໍ່ເຈົ້າ

**ສີຫະໂກດຖຸຊາດົກທີ ໒ ຈົບ**

## ໙. ສີຫະຈຳມະຊາດົກ (໑໗໙)
## ວ່າດ້ວຍລາປອມຕົວເປັນຣາດຊະສີ

(ພຣະໂພທິສັດສະເຫວີຍພຣະຊາດເປັນຊາວນາໄດ້ຍິນສຽງລາປອມຮ້ອງ ກໍຮູ້ວ່າເປັນລາ ຈຶ່ງກ່າວຄາຖາວ່າ)

[໑໗]　ນັ້ນບໍ່ແມ່ນສຽງບັນລືຂອງຣາດຊະສີ
ບໍ່ແມ່ນສຽງຂອງເສືອໂຄ່ງ
ບໍ່ແມ່ນສຽງຂອງເສືອເຫຼືອງ
ແຕ່ເປັນລາຄຸມຕົວດ້ວຍໜັງຣາດຊະສີຮ້ອງຢູ່

(ພໍ່ຄ້າມາເຫັນລາເຖິງຄວາມບອບຊໍ້າ ຈຶ່ງກ່າວຄາຖາທີ ໘ ວ່າ)

[໑໘]　ລາເອົາໜັງຣາດຊະສີຄຸມຕົວ
ຫຍໍ້າກິນເຂົ້າໜຽວອັນຂຽວສົດເປັນເວລານານ
ເພາະສຽງທີ່ມັນຮ້ອງອອກມານັ້ນທຳລາຍຕົວເອງ

**ສີຫະຈຳມະຊາດົກທີ ໙ ຈົບ**

## ໑໐. ສີລານິສັງສະຊາດົກ (໑໙໐)
## ວ່າດ້ວຍອານິສົງຂອງສີນ

(ເທວະດາປະຈຳສະມຸດ ກ່າວເຖິງຄຸນຂອງການສັງສັນກັບບັນດິດວ່າ)

[໑໙]　ເບິ່ງເທີ້ນ ນີ້ແລຜົນຂອງສັດທາ ສີນ ແລະຈາຄະ
ພະຍານາກແປງຕົນເປັນເຮືອນຳອຸປາສົກຜູ້ມີສັດທາໄປ

[໗໐]　ເພິ່ງຄົບຫາສັດຕະບຸຣຸດທີ່ນັ້ນ
ເພິ່ງທຳຄວາມສະໜິດສະໜົມກັບສັດຕະບຸຣຸດ
ຍ້ອນການຢູ່ຮ່ວມກັບສັດຕະບຸຣຸດ ນາຍຊ່າງຕັດຜົມຈຶ່ງເຖິງຄວາມປອດໄພ

**ສີລານິສັງສະຊາດົກທີ ໑໐ ຈົບ**

**ອະສະທິສະວັກທີ ໔ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື



# ໕. ຣຸຫະກະວັກ

## ໝວດວ່າດ້ວຍຣຸຫະກະປຸໂຣຫິດ

## ໑. ຣຸຫະກະຊາດົກ (໑໙໑)

## ວ່າດ້ວຍຣຸຫະກະປຸໂຣຫິດ

(ພຣະຣາຊາໂພທິສັດຊົງຫວັງຈະໃຫ້ຣຸຫະກະປຸໂຣຫິດຍົກໂທດໃຫ້ນາງພາມມະນີ ຈຶ່ງຕັດວ່າ)

[໗໑] ຜູ້ຈະເລີນ ຣຸຫະກະ ສາຍທະນູທີ່ຂາດໄປແລ້ວກໍຍັງຕໍ່ໃຫ້ຕິດອີກໄດ້
ທ່ານຈົ່ງຄືນດີກັບພັນລະຍາເກົ່າເທີ້ນ ຢ່າລຸອຳນາດແຫ່ງຄວາມໂກດເລີຍ

(ຣຸຫະກະປຸໂຣຫິດໄດ້ຟັງພຣະດຳຣັດນັ້ນ ຈຶ່ງຂາບທູນວ່າ)

[໗໔] ເມື່ອສາຍປ່ານຍັງມີຢູ່ ນາຍຊ່າງຜູ້ເຮັດສາຍທະນູກໍມີຢູ່
ຂ້າພຣະອົງຈັກເຮັດສາຍທະນູໃໝ່
ພໍແລ້ວສຳລັບສາຍທະນູເກົ່າ

**ຣຸຫະກະຊາດົກທີ ໑ ຈົບ**

## ໔. ສິຣິກາລະກັນນິຊາດົກ (໑໙໔)

## ວ່າດ້ວຍສິຣິກັບກາລະກັນນີ

(ພຣະຣາຊາຕັດຖາມເສນະກະບັນດິດວ່າ)

[໗໒] ຍິງທີ່ມີຮູບງາມ ມີກິຣິຍາມາຣະຍາດງາມ
ແລະຄວາມປະພຶດຮຽບຮ້ອຍ ຊາຍບໍ່ເພິ່ງປາຖະໜານາງ
ທ່ານເຊື່ອບໍ່ມະໂຫສິດບັນດິດ

(ເສນະກະບັນດິດຟັງພຣະດຳຣັດນັ້ນແລ້ວ ຈຶ່ງຂາບທູນວ່າ)

[໘໔] ຂ້າແດ່ມະຫາຣາດ ຂ້າພຣະອົງເຊື່ອ ຂ້ານ້ອຍ
ຊາຍນັ້ນຄົງເປັນຄົນຕ່ຳຕ້ອຍ
ເພາະສິຣິກັບກາລະກັນນີເຂົ້າກັນບໍ່ໄດ້ເລີຍບໍ່ວ່າໃນການໃດ ໆ

**ສິຣິກາລະກັນນິຊາດົກທີ ໘ ຈົບ**

# ໓. ຈູລະປະທຸມະຊາດົກ (໑໙໓)
# ວ່າດ້ວຍພຣະເຈົ້າຈູລະປະທຸມ

(ປະທຸມກຸມານໂພທິສັດໄດ້ສະດັບຄຳຂອງຊາຍາຜູ້ຊົ່ວຊ້າແລ້ວ ຈຶ່ງຕັດວ່າ)

[໘໕] ແມ່ຍິງຄົນນີ້ຄືຍິງຄົນນັ້ນ
ແມ່ນເຮົາກໍຄືຊາຍຄົນນັ້ນ ບໍ່ແມ່ນຄົນອື່ນ
ຊາຍຄົນທີ່ແມ່ຍິງນີ້ອ້າງວ່າເປັນສາມີຂອງນາງຕັ້ງແຕ່ຍັງເປັນກຸມາຣີ
ກໍຄືຊາຍທີ່ຖືກຕັດມືຕັດຕີນຄົນນີ້ ບໍ່ແມ່ນຄົນອື່ນ
ຂຶ້ນຊື່ວ່າແມ່ຍິງແລ້ວແມ່ນເຊື່ອຖືບໍ່ໄດ້ ສັດຈະບໍ່ມີໃນແມ່ຍິງທັງຫຼາຍ

[໘໖] ພວກທ່ານຈົ່ງຕີຊາຍຊົ່ວຊ້າ ຫຍາບຄາຍ ຄ້າຍຄືຊາກສົບ
ມັກເປັນຊູ້ກັບພັນລະຍາຄົນອື່ນຄົນນີ້ສາດ້ວຍສາກ
ຈົ່ງຕັດໃບຫູແລະດັງຂອງແມ່ຍິງຜູ້ປິ້ນນິບັດສາມີ
ດ້ວຍຄວາມຊົ່ວຊ້ານັ້ນ ຄົນນີ້ສາເທີ້ນ

**ຈູລະປະທຸມະຊາດົກທີ ໓ ຈົບ**

# ໔. ມະນິໂຈຣະຊາດົກ (໑໙໔)
# ວ່າດ້ວຍພຣະເຈົ້າອະທຳມິກະຣາດລົງໂທດໂຈນລັກແກ້ວມະນີ

(ນາງສຸຊາດາເຫັນຄະຫະບໍດີໂພທິສັດຖືກຄຸ່ງນຕີ ຣຳເລີກເຖິງສິນຂອງຕົນແລ້ວ ຈຶ່ງກ່າວວ່າ)

[໘໗] ເທວະດາທັງຫຼາຍບໍ່ມີຫຼືບໍ່ຢູ່ເປັນແນ່
ເມື່ອມີກິດເຫັນປານນີ້ເກີດຂຶ້ນ
ເທວະດາທັງຫຼາຍກໍພາກັນໄປຄ້າງແຮມທີ່ອື່ນໝົດແລ້ວ
ອັນໜຶ່ງ ທ່ານຜູ້ຮັກສາໂລກກໍບໍ່ມີຢູ່ໃນໂລກນີ້ແລ້ວ

ເມື່ອຄົນທຸສິນທັງຫຼາຍເຮັດກຳອັນຫຍາບຊ້າຢູ່
ຄົນທັງຫຼາຍຜູ້ຫ້າມປາມກໍບໍ່ມີ

(ທ້າວສັກກະຖວາຍໂອວາດແກ່ພຣະຣາຊາວ່າ)

[໗໗] ໃນສະໄໝຂອງພຣະຣາຊາຜູ້ບໍ່ຊົງທຳ
ໃນການບໍ່ສົມຄວນຕົກ ຝົນກໍຕົກ
ໃນການສົມຄວນຈະຕົກ ຝົນກໍບໍ່ຕົກ
ພຣະຣາຊາຜູ້ບໍ່ຊົງທຳ ຈຸຕິຈາກໂລກສະຫວັນ
ພຣະຣາຊາພຣະອົງນັ້ນຖືກທຳລາຍແລ້ວ
ຍ້ອນເຫດແຫ່ງຄວາມຊົ່ວມີປະມານທໍ່ນັ້ນ

**ມະນິໂຈຣະຊາດົກທີ ໔ ຈົບ**

## ໕. ປັບພະຕູປັດຖະຣະຊາດົກ (໑໗໕)
## ວ່າດ້ວຍສະໂບກຂະຣະນີທີ່ຕີນພູ

(ພຣະຣາຊາຕັດຖາມບັນຫາກັບອຳມາດໂພທິສັດວ່າ)

[໗໙] ສະໂບກຂະຣະນີມີນ້ຳເຢັນ ຣົດແຊບ
ເກີດຢູ່ທີ່ເນີນຫີນຕີນພູຫິມະພານ ໜ້າຣື່ນຣົມ
ໝາຈອກຮູ້ຢູ່ວ່າ ຣາດຊະສີຮັກສາສະໂບກຂະຣະນີນັ້ນໄວ້
ກໍຍັງລົງໄປດື່ມກິນ

(ອຳມາດໂພທິສັດຮູ້ວ່າ ອຳມາດຄົນໜຶ່ງຈະກໍ່ເຫດຮ້າຍພາຍໃນພຣະຣາດຊະວັງ ຈຶ່ງຂາບທູນວ່າ)

[໘໐] ຂ້າແດ່ມະຫາຣາດ ຖ້າສັດມີຕີນທັງຫຼາຍພາກັນດື່ມນ້ຳໃນມະຫານະທີ
ແມ່ນ້ຳຈະບໍ່ຊື່ວ່າເປັນແມ່ນ້ຳຍ້ອນເຫດນັ້ນກໍບໍ່ແມ່ນ
ຫາກວ່າຊົນ ໔ ຄົນນັ້ນເປັນທີ່ຮັກ
ຂໍພຣະອົງຊົງງົດໂທດສາເທີ້ນ

**ປັບພະຕູປັດຖະຣະຊາດົກທີ ໕ ຈົບ**

## ໖. ວະລາຫະກັດສະຊາດົກ (໑໗໖)
## ວ່າດ້ວຍຄວາມປອດໄພເກີດຈາກມ້າວະລາຫະກະ

(ພຣະສາດສະດາຊົງນຳອະດີດນິທານມາສະແດງແລ້ວ ຈຶ່ງໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ)

[໘໑] ຄົນເຫຼົ່າໃດບໍ່ເຮັດຕາມໂອວາດທີ່ພຣະພຸດທະເຈົ້າຊົງສະແດງໄວ້
ຄົນເຫຼົ່ານັ້ນຈັກເຖິງຄວາມພິນາດ
ເໝືອນພວກພໍ່ຄ້າທີ່ຖືກພວກນາງຣາກສົດປະເລົ້າປະໂລມ

[໘໔] ສ່ວນຄົນເຫຼົ່າໃດເຮັດຕາມໂອວາດທີ່ພຣະພຸດທະເຈົ້າຊົງສະແດງໄວ້
ຄົນເຫຼົ່ານັ້ນຈັກປອດໄພ
ເໝືອນພວກພໍ່ຄ້າທີ່ເຊື່ອຟັງຄຳຂອງພະຍາມ້າວະລາຫະກະ

**ວະລາຫະກັດສະຊາດົກທີ ໖ ຈົບ**

## ໗. ມິດຕາມິດຕະຊາດົກ (໑໙໗)
## ວ່າດ້ວຍອາການຂອງຜູ້ເປັນມິດແລະບໍ່ແມ່ນມິດ

(ລືສີໂພທິສັດບອກເຫດແກ່ດາບົດທັງຫຼາຍວ່າ)

[໘໓] ບຸກຄົນເຫັນຄົນຜູ້ເປັນສັດຕູກັນແລ້ວຍ່ອມບໍ່ຍິ້ມແຍ້ມ
ບໍ່ຊື່ນຊົມສັດຕູນັ້ນ ເມື່ອສົບຕາກັນກໍເບືອນໜ້າໄປທາງອື່ນ
ແລະປະພຶດກົງກັນຂ້າມ

[໘໔] ອາການທັງຫຼາຍຜາກົດເປັນສັດຕູ
ບັນດິດເຫັນແລ້ວ ຟັງແລ້ວເຊື່ອອາການເຫຼົ່ານັ້ນ
ເພິ່ງຮູ້ໄດ້ວ່າ ຜູ້ນີ້ເປັນສັດຕູຂອງເຮົາ

**ມິດຕາມິດຕະຊາດົກທີ ໗ ຈົບ**

## ໘. ຣາທະຊາດົກ (໑໙໘)
## ວ່າດ້ວຍນົກຣາທະໂພທິສັດ

(ພາມຖາມ ນົກຣາທະໂພທິສັດວ່າ)

[໘໕] ລູກເອີຍ ພໍ່ຫາກໍ່ກັບມາຈາກທີ່ຄ້າງແຮມ ມາເຖິງດຽວນີ້ເອງ
ຍັງບໍ່ດົນຫຼາຍລູກເອີຍ ແມ່ຂອງເຈົ້າບໍ່ໄປຄົບຫາຊາຍອື່ນບໍ?

(ນົກຣາທະໂພທິສັດແຈ້ງໃຫ້ພາມຮູ້ວ່າ)

[໘໖] ທຳມະດາບັນດິດເມື່ອກ່າວຄຳຈິງ

ແຕ່ຄຳນັ້ນເປັນການກ່າວເຖິງຄວາມບໍ່ດີຈະເພິ່ງມີກໄໝ້
ເໝືອນນົກແຂກເຕົ້າຊື່ໂປຕະກະປາທະມີກໄໝ້ຢູ່ໃນເຕົາໄຟ

**ຣາທະຊາດົກທີ ໗ ຈົບ**

## ໙. ຄະທະປະຕິຊາດົກ (໑໙໙)
## ວ່າດ້ວຍຄະຫະບໍດີໂພທິສັດ

(ຄະຫະບໍດີໂພທິສັດເຫັນກິຣິຍາຂອງພັນລະຍາ ແລະຊາຍຊູ້ ເມື່ອຈະປະກາດເນື້ອຄວາມນັ້ນ
ຈຶ່ງກ່າວວ່າ)

[໙໗] ເຫດທັງ ໔ ປະການບໍ່ຄວນແກ່ເຮົາ ເຮົາບໍ່ພໍໃຈເລີຍ
ກໍຍິງນີ້ລົງໄປໃນເລົ້າເຂົ້າແລ້ວ ຍັງເວົ້າວ່າ ເຮົາຍັງໃຊ້ຄືນທ່ານບໍ່ໄດ້

[໙໘] ນີ້ທ່ານນາຍບ້ານ ຍ້ອນເຫດນັ້ນ ເຮົາຈຶ່ງເວົ້າກັບທ່ານ
ໃນເວລາເມື່ອເຮົາມີຊີວິດຝືດເຄືອງຍາກເຂັນ
ທ່ານໄດ້ເຮັດສັນຍາກຳນົດໄວ້ ໔ ເດືອນ
ແລ້ວມາທວງຊີ້ນງົວຈ່ອຍແກ່ເມື່ອຍັງບໍ່ເຖິງກຳນົດເວລາສັນຍາ
ເຫດທັງ ໔ ປະການນັ້ນເຮົາບໍ່ພໍໃຈເລີຍ

**ຄະຫະປະຕິຊາດົກທີ ໙ ຈົບ**

## ໑໐. ສາທຸສີລະຊາດົກ (໔໐໐)
## ວ່າດ້ວຍເລືອກເອົາຜູ້ມີສິນ

(ພາມຖາມພຣະໂພທິສັດຜູ້ເປັນອາຈານວ່າ)

[໙໙] ຂ້າພະເຈົ້າຂໍຖາມທ່ານພາມວ່າ ບັນດາຄົນ ໔ ຄົນ ຄື
(໑) ຄົນມີຮູບງາມ (໔) ຄົນມີອາຍຸ (໓) ຄົນມີຊາດສູງ
(໔) ຄົນມີສິນລະທຳ ທ່ານຈະເລືອກເອົາໃຜນໍ?

(ອາຈານຟັງຄຳຂອງພາມນັ້ນແລ້ວກ່າວວ່າ)

[໑໐໐] ຮ່າງກາຍກໍມີປະໂຫຍດ ຂ້າພະເຈົ້າຂໍທຳຄວາມນອບນ້ອມຕໍ່ທ່ານ
ຜູ້ຈະເລີນໄວ ຊາດສູງກໍມີປະໂຫຍດ ແຕ່ຂ້າພະເຈົ້າພໍໃຈສິນ

**ສາທຸສີລະຊາດົກທີ ໑໐ ຈົບ**

**ຣຸຫະກະວັກທີ ໕ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື



# ໒. ນະຕັງທັນລະຫະວັກ

## ໝວດວ່າດ້ວຍເຄື່ອງຜູກທີ່ໝັ້ນຄົງ

## ໑. ພັນທະນາກາຣະຊາດົກ (໘໐໑)

## ວ່າດ້ວຍເຄື່ອງຜູກ

(ລືສີໂພທິສັດເປ່ງອຸທານວ່າ)

[໑໐໑] ນັກປາດບໍ່ກ່າວເຄື່ອງຜູກທີ່ເຮັດດ້ວຍເຫຼັກ ເຮັດດ້ວຍໄມ້
ແລະເຮັດດ້ວຍຫຍ້າປ້ອງວ່າ ເປັນເຄື່ອງຜູກທີ່ໝັ້ນຄົງ
ສ່ວນຄວາມກຳໜັດຍິນດີໃນແກ້ວມະນີແລະຕຸ້ມຫູກໍດີ
ຄວາມມີເຍື່ອໃຍໃນບຸດແລະພັນລະຍາກໍດີ

[໑໐໘] ນັກປາດກ່າວວ່າເປັນເຄື່ອງຜູກທີ່ປະກອບດ້ວຍກິເລດນັ້ນວ່າ
ເປັນເຄື່ອງຜູກທີ່ໝັ້ນຄົງ ນຳສັດໃຫ້ຕົກຕ່ຳ ຫຍ່ອນຍານ ແກ້ໄດ້ຍາກ
ນັກປາດທັງຫຼາຍຕັດເຄື່ອງຜູກນັ້ນໄດ້ຂາດ
ໝົດຄວາມເຍື່ອໃຍ ລະຄວາມສຸກໃນກາມສາແລ້ວຫຼີກໄປ

**ພັນທະນາກາຣະຊາດົກທີ ໑ ຈົບ**

## ໘. ເກລິສີລະຊາດົກ (໔໐໘)
## ວ່າດ້ວຍຜູ້ມີປີກກະຕືນົວເນົາໃນການຫຼິ້ນ

(ພຣະສາດສະດາຊົງນຳອະດີດນິທານມາສະແດງແລ້ວ ຈຶ່ງໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ)

[໑໐໗] ພວກຫົງກໍດີ ນົກກະຣຽນກໍດີ ນົກຍູງກໍດີ
ຊ້າງກໍດີ ເນື້ອຟານກໍດີ ຕ່າງກໍຢ້ານຣາດຊະສີນຳກັນທັງໝົດ
ຮ່າງກາຍບໍ່ຖືເປັນປະມານ

[໑໐໘] ໃນໝູ່ມະນຸດກໍຄືກັນ
ແມ່ນເດັກຖ້າມີປັນຍາກໍເປັນຜູ້ໃຫຍ່ໄດ້
ສ່ວນຄົນພານເຖິງຈະມີຮ່າງກາຍໃຫຍ່ສູງກໍເປັນຜູ້ໃຫຍ່ບໍ່ໄດ້

**ເກລິສີລະຊາດົກທີ ໘ ຈົບ**

## ໙. ຂັນທະຊາດົກ (໔໐໙)
## ວ່າດ້ວຍຂັນທະປະຣິດປ້ອງກັນສັດຮ້າຍຕ່າງ ໆ ໄດ້

(ລືສີໂພທິສັດສອນດາບົດທັງຫຼາຍໃຫ້ຈະເລີນເມດຕາໃນພະຍາງູທັງ ໔ ວ່າ)

[໑໐໙] ເຮົາຂໍມີເມດຕາກັບຕະກູນພະຍາງູວິຣູປັກ
ເຮົາຂໍມີເມດຕາກັບຕະກູນພະຍາງູເອຣາປະຖະ
ເຮົາຂໍມີເມດຕາກັບຕະກູນພະຍາງູສັບພະຍາບຸດ
ເຮົາຂໍມີເມດຕາກັບຕະກູນພະຍາງູກັນຫາໂຄຕະມະກະ
ເຮົາຂໍມີເມດຕາກັບສັດບໍ່ມີຕີນ ເຮົາຂໍມີເມດຕາກັບສັດສອງຕີນ
ເຮົາຂໍມີເມດຕາກັບສັດສີ່ຕີນ ເຮົາຂໍມີເມດຕາກັບສັດມີຫຼາຍຕີນ
ສັດບໍ່ມີຕີນຢ່າໄດ້ບຽດບຽນເຮົາ
ສັດສອງຕີນຢ່າໄດ້ບຽດບຽນເຮົາ ສັດສີ່ຕີນຢ່າໄດ້ບຽດບຽນເຮົາ
ສັດມີຫຼາຍຕີນຢ່າໄດ້ບຽດບຽນເຮົາ
ຂໍສັບພະສັດທີ່ມີລົມກາຍໃຈ
ຂໍສັບພະສັດທີ່ຍັງມີຊີວິດທັງມວນຈົ່ງພົບກັບຄວາມຈະເລີນ
ອັນຕະລາຍທັງຫຼາຍຢ່າໄດ້ມາບຽດບຽນສັດຕົນໃດຕົນໜຶ່ງເລີຍ

[໑໑໐] ພຣະພຸດທະເຈົ້າມີພຣະຄຸນຫາປະມານບໍ່ໄດ້

ພຣະທຳມີພຣະຄຸນຫາປະມານບໍ່ໄດ້
ພຣະສົງມີພຣະຄຸນຫາປະມານບໍ່ໄດ້
ສັດເລືອຄານທັງຫຼາຍ ຄື ງູ ແມງງອດ
ຂີ້ເຂັບ ແມງມຸມ ກັບແກ້ ໜູ ມີຄຸນປະມານໄດ້
ເຮົາທຳການຮັກສາ ທຳການປ້ອງກັນໄວ້ແລ້ວ
ຂໍໝູ່ສັດຜູ້ມີຊີວິດທັງຫຼາຍຈົ່ງຫຼີກໄປ
ເຮົານັ້ນຂໍນອບນ້ອມພຣະຜູ້ມີພຣະພາກ
ຂໍນອບນ້ອມພຣະສຳມາສຳພຸດທະເຈົ້າທັງ ၇ ພຣະອົງ

**ຂັນທະຊາດົກທີ ໓ ຈົບ**

## ໔. ວີຣະກະຊາດົກ (໔໐໔)
## ວ່າດ້ວຍກາວີຣະກະໂພທິສັດ

(ນາງກາເມຍຂອງກາສະວິດຖະກະບໍ່ເຫັນກາສະວິດຖະກະກັບມາ ຈຶ່ງຖາມກາວີຣະກະໂພທິສັດວ່າ)

[໑໐໗] ທ່ານວີຣະກະ ທ່ານເຫັນນົກຊື່ສະວິດຖະກະ
ຜົວຂ້າພະເຈົ້າທີ່ຮ້ອງດ້ວຍສຽງອັນມ່ວນ
ມີສ້ອຍຄໍສີຄ້າຍຄືສ້ອຍຄໍນົກຍູງແດ່ບໍ

(ກາວີຣະກະໂພທິສັດກ່າວວ່າ)

[໑໐໘] ກາສະວິດຖະກະເມື່ອເຮັດຕາມປັກສີທີ່ມີປົກກະຕິທ່ຽວຫາກິນ
ທັງທາງນ້ຳແລະທາງບົກ ກິນປາດິບຢູ່ເປັນນິດ
ຖືກສາຫຣ່າຍພັນຄໍຕາຍແລ້ວ

**ວີຣະກະຊາດົກທີ ໔ ຈົບ**

## ໕. ຄັງເຄີຍຍະຊາດົກ (໔໐໕)
## ວ່າດ້ວຍເຕົ່າງາມກວ່າປາໃນແມ່ນ້ຳຄົງຄາ

(ເຕົ່າກ່າວກັບປາວ່າ)

[໑໐໙] ປາທີ່ຢູ່ໃນແມ່ນ້ຳຄົງຄາກໍງາມ

ເຖິງປາທີ່ຢູ່ໃນແມ່ນ້ຳຍະມຸນາກໍງາມ
ແຕ່ສັດສີ່ຕີນມີສັນຖານກົມຄ້າຍຄືຕົ້ນໄຮ
ມີຄໍຍື່ນອອກມາຕົວນີ້ສະຫງ່າງາມກວ່າໃຜທັງໝົດ

(ປາ ກ່າວວ່າ)

[໑໑໐] ທ່ານບໍ່ຕອບເຫດທີ່ເຮົາຖາມ
ທ່ານຖືກຖາມແນວໜຶ່ງ ກັບຕອບໄປອີກແນວໜຶ່ງ
ຄົນທີ່ຍ້ອງຍໍຕົນເອງ ພວກເຮົາບໍ່ພໍໃຈເລີຍ

**ຄັງເຄີຍຍະຊາດົກທີ ໕ ຈົບ**

## ໖. ກຸຣຸງຄະມິຄະຊາດົກ (໘໐໖)
## ວ່າດ້ວຍນົກແລະເຕົ່າຊ່ອຍກວາງ

( ນົກສະຕະປັດຕະຊ່ອຍກວາງໃຫ້ພົ້ນຈາກບ້ວງແລ້ວ ຈຶ່ງກ່າວວ່າ)

[໑໑໑] ເອົາເທີ້ນເຕົ່າເອີຍ ເຈົ້າຈົ່ງໃຊ້ແຂ້ວກັດບ້ວງໜັງ
ສ່ວນເຮົາຈັກເຮັດໂດຍວິທີທີ່ນາຍພານຈະມາບໍ່ເຖິງ

(ພຣະສາດສະດາຕັດພຣະຄາຖາທີ ໘ ວ່າ)

[໑໑໘] ເຕົ່າກໍລົງນ້ຳ ກວາງກໍເຂົ້າປ່າ
ສ່ວນນົກສະຕະປັດຕະກັບມາເຖິງຕົ້ນໄມ້ແລ້ວ
ໄດ້ພາລູກ ໆ ໜີໄປຢູ່ແສນໄກ

**ກຸຣຸງຄະມິຄະຊາດົກທີ ໖ ຈົບ**

## ໗. ອັດສະກະຊາດົກ (໘໐໗)
## ວ່າດ້ວຍພຣະນາງອຸບພະຣິເທວີຂອງພຣະເຈົ້າອັດສະກະ

(ພຣະນາງອຸບພະຣິເທວີຂອງພຣະເຈົ້າອັດສະກະສະຫວັນນະຄົດໄປເກີດເປັນໜອນ ໄດ້ກ່າວຄາ-
ຖາພາສາມະນຸດໃນທ່າມກາງບໍລິສັດວ່າ)

[໑໑໙] ສະຖານທີ່ນີ້ຂ້າພະເຈົ້າໄດ້ທ່ຽວຫຼິ້ນ
ກັບພຣະເຈົ້າອັດສະກະພຣະສະວາມີສຸດທີ່ຮັກ

ຜູ້ມີພະປະສົງຕາມຄວາມຕ້ອງການ

[໑໑໔] ຄວາມສຸກແລະຄວາມທຸກເກົ່າ ໆ
ຖືກຄວາມສຸກແລະຄວາມທຸກໃໝ່ ໆ ປິດບັງໄວ້
ເພາະສະນັ້ນ ແມງຈຶ່ງເປັນທີ່ຮັກຂອງຂ້າພະເຈົ້າ
ຍິ່ງກວ່າພຣະເຈົ້າອັດສະກະເສຍອີກ

**ອັດສະກະຊາດົກທີ ໗ ຈົບ**

## ໘. ສຸງສຸມາຣະຊາດົກ (໔໐໘)
## ວ່າດ້ວຍປັນຍາຂອງແຂ້

(ພະຍາວານອນໂພທິສັດໄດ້ກ່າວກັບແຂ້ວ່າ)

[໑໑໕] ຢ່າເລີຍສຳລັບໝາກມ່ວງ ໝາກຫວ້າ
ແລະໝາກມີ້ທີ່ທ່ານເຫັນຢູ່ ສະມຸດ ຝັ່ງນັ້ນ
ໝາກເດື່ອຂອງເຮົາປະເສີດກວ່າ

[໑໑໖] ຮ່າງກາຍຂອງທ່ານໃຫຍ່ຊື່ ໆ
ແຕ່ປັນຍາບໍ່ສົມກັບຮ່າງກາຍເລີຍ
ນີ້ແຂ້ ເຈົ້າຖືກເຮົາລວງແລ້ວ
ບັດນີ້ເຈົ້າຈົ່ງໄປຕາມສະບາຍເທີ້ນ

**ສຸງສຸມາຣະຊາດົກທີ ໘ ຈົບ**

## ໙. ກຸກກຸຕະຊາດົກ (໔໐໙)
## ວ່າດ້ວຍໄກ່

(ໄກ່ຕ້ອງການຈະໃຫ້ນາຍພານລະອາຍໃຈ ຈຶ່ງເວົ້າເປັນພາສາມະນຸດວ່າ)

[໑໑໗] ຕົ້ນທູກວາງ ຕົ້ນສົ້ມມໍພິເພກໃນປ່າ
ຂ້າພະເຈົ້າໄດ້ເຫັນແລ້ວ
ຕົ້ນໄມ້ເຫຼົ່ານັ້ນບໍ່ສາມາດຈະເຄື່ອນທີ່ໄດ້ເໝືອນກັບທ່ານ

(ນາຍພານກ່າວວ່າ)

[໑໑໘] ໄກ່ຕົວນີ້ຄືໄກ່ຕົວເກົ່າທີ່ແຫກກົງໜີອອກມາ
ເປັນໄກ່ທີ່ສະຫຼາດ ຫຼົບໜີຈາກບ້ວງສັດມາໄດ້
ແລະຍັງຂັນເຍີ້ຍຫຍັນອີກ

**ກຸກກຸຕະຊາດົກທີ ໙ ຈົບ**

## ໑໐. ກັນທະຄະລະກະຊາດົກ (໘໑໐)
## ວ່າດ້ວຍນົກຫົວຂວານຕາຍເພາະໄມ້ແກ່ນ

(ນົກຫົວຂວານກັນທະຄະລະກະຕົກລົງພື້ນດິນແລ້ວ ກ່າວກັບນົກຫົວຂວານຂະທິຣະວະນິຍະໂພທິສັດວ່າ)

[໑໑໙] ທ່ານຂະທິຣະວະນິຍະຜູ້ຈະເລີນ ຕົ້ນໄມ້ຕົ້ນນີ້
ມີໃບກ້ຽງ ມີໜາມ ຊື່ຕົ້ນຫຍັງ?
ຫົວຂອງຂ້າພະເຈົ້າແຕກ
ຍ້ອນການເຈາະຕົ້ນໄມ້ນີ້ພຽງຄັ້ງດຽວທໍ່ນັ້ນ

(ນົກຫົວຂວານຂະທິຣະວະນິຍະໂພທິສັດ ຟັງຄຳລຳພັນຂອງນົກຫົວຂວານກັນທະຄະລະກະແລ້ວຈຶ່ງກ່າວວ່າ)

[໑໘໐] ນົກຫົວຂວານໂຕນີ້ຊື່ ກັນທະຄະລະກະ ເມື່ອຈະເຈາະໝູ່ໄມ້ໃນປ່າ
ໄດ້ບິນທ່ອງທ່ຽວໄປໃນໝູ່ໄມ້ແຫ້ງທີ່ບໍ່ມີແກ່ນ
ຕໍ່ມາພາຍຫຼັງ ໄດ້ມາພົບໄມ້ແຄນເຊິ່ງມີແກ່ນໂດຍທຳມະຊາດ
ໄດ້ທຳລາຍຫົວຂອງນົກຫົວຂວານໂຕນີ້ແລ້ວ

**ກັນທະຄະລະກະຊາດົກທີ ໑໐ ຈົບ**

**ນະຕັງທັນລະຫະວັກທີ ໒ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ພັນທະນາກາຣະຊາດົກ
໒. ຂັນທະຊາດົກ
໕. ຄັງເຄີຍຍະຊາດົກ
໘. ເກລີສີລະຊາດົກ
໔. ວີຣະກະຊາດົກ
໒. ກຸຣຸງຄະມິຄະຊາດົກ

໗. ອັດສະກະຊາດົກ
໘. ກຸກກຸຕະຊາດົກ
໙. ສຸງສຸມາຣະຊາດົກ
໑໐. ກັນທະຄະລະກະຊາດົກ

# ໗. ພີຣະນະຖໍາພະກະວັກ

## ໝວດວ່າດ້ວຍປ່າຊ້າພີຣະນະຖໍາພະກະ

## ໑. ໂສມະທັດຕະຊາດົກ (໔໑໑)

## ວ່າດ້ວຍພາມຊື່ໂສມະທັດ

(ພາມໂສມະທັດຕະໂພທິສັດກ່າວກັບພໍ່ວ່າ)

[໑໔໑]   ພໍ່ເປັນຜູ້ບໍ່ຜະໝາດຢູ່ເປັນນິດ
ໄດ້ທໍາຄວາມພຽນຢູ່ໃນປ່າຊ້າທີ່ຊື່ພີຣະນະຖໍາພະກະຕະຫຼອດທັງປີ
ເມື່ອເຂົ້າສູ່ທີ່ປະຊຸມບໍລິສັດກັບເວົ້າອີກແນວໜຶ່ງ
ຄວາມພຽນປ້ອງກັນຜູ້ປາສະຈາກປັນຍາບໍ່ໄດ້

(ພາມຜູ້ເປັນບິດາກ່າວວ່າ)

[໑໔໔]   ທ້າວໂສມະທັດ ຂຶ້ນຊື່ວ່າຜູ້ຂໍຍ່ອມໄດ້ຜົນ ໔ ຢ່າງ ຄື

(໑) ບໍ່ໄດ້ຊັບ (໔) ໄດ້ຊັບ

ເພາະວ່າການຂໍມີສະພາບເຊັ່ນນີ້ເປັນທໍາມະດາ

**ໂສມະທັດຕະຊາດົກທີ ໑ ຈົບ**

## ໔. ອຸດສິຕະຖະພັດຕະຊາດົກ (໔໑໔)

## ວ່າດ້ວຍພາມບໍຣິໂພກອາຫານທີ່ເປັນເງື່ອນ

(ພາມຖາມນາງພາມມະນີວ່າ)

[໑໔໕]   ເຂົ້າຂ້າງເທິງມີອຸນຫະພູມຢ່າງໜຶ່ງ
ເຂົ້າຂ້າງລຸ່ມມີອຸນຫະພູມຢ່າງໜຶ່ງ
ແມ່ພາມມະນີ ຂ້ອຍຂໍຖາມເຈົ້າຈັກໜ້ອຍແດ່
ເປັນຫຍັງເຂົ້າຂ້າງລຸ່ມຈຶ່ງເຢັນ ສ່ວນເຂົ້າຂ້າງເທິງຈຶ່ງຮ້ອນ

(ບຸດນັກຟ້ອນໂພທິສັດໄດ້ບອກພຶດຕິກຳທັງໝົດກັບພາມວ່າ)

[໑໘໔] ທ່ານຜູ້ຈະເລີນ ຂ້າພະເຈົ້າເປັນນັກຟ້ອນລຳທ່ຽວຂໍມາຈົນເຖິງບ່ອນນີ້
ສ່ວນຊາຍເປັນຊູ້ຂອງນາງພາມມະນີນີ້ລົງໄປຊ່ອນຕົວຢູ່ໃນເລົ້າເຂົ້າ
ຄົນທີ່ທ່ານເສາະຫານັ້ນກໍຄືຊາຍຊູ້ນີ້

**ອຸດສິດຖະພັນຕະຊາດົກທີ ໒ ຈົບ**

## ໓. ພະຣຸຣາຊະຊາດົກ (໔໑໓)
## ວ່າດ້ວຍພຣະຣາຊາແຄວ້ນພະຣຸ

(ພຣະສາດສະດາຊົງນຳເລື້ອງອະດີດມາແລ້ວ ຕັດພຣະຄາຖາເຫຼົ່ານີ້ວ່າ)

[໑໘໕] ຕະຖາຄົດໄດ້ສະດັບມາວ່າ ພຣະຣາຊາແຫ່ງແຄວ້ນພະຣຸ
ຊົງເຮັດຊ່ອງວ່າງລະຫວ່າງລີສີທັງຫຼາຍຍ້ອນຄວາມພໍໃຈ
ພຣະອົງຊົງປະສົບຄວາມວິບັດ ພ້ອມທັງຖືກຕັດຂາດຈາກແຄວ້ນ

[໑໘໖] ເພາະສະນັ້ນ ບັນດິດທັງຫຼາຍຈຶ່ງບໍ່ສັນເສີນ
ການລຸອຳນາດຄວາມພໍໃຈ
ບຸກຄົນຜູ້ມີຈິດອັນກິເລດບໍ່ປະທຸດສະຮ້າຍ
ຈະກ່າວແຕ່ຄຳເວົ້າທີ່ປະກອບດ້ວຍສັດຈະທໍ່ນັ້ນ

**ພະຣຸຣາຊະຊາດົກທີ ໓ ຈົບ**

## ໔. ປຸນນະນະທີຊາດົກ (໔໑໔)
## ວ່າດ້ວຍການອຸປະມາດ້ວຍແມ່ນ້ຳທີ່ເຕັມຝັ່ງ

(ພຣະຣາຊາຊົງຣະນຶກເຖິງຄຸນຂອງປຸໂຣຫິດໂພທິສັດແລ້ວ ຊົງຂຽນຄາຖາລົງໃນໃບລານວ່າ)

[໑໘໗] ຊົນທັງຫຼາຍກ່າວເຖິງແມ່ນ້ຳທີ່ເຕັມຝັ່ງວ່າກາຕົວໃດກິນໄດ້ກໍດີ
ກ່າວເຖິງເຂົ້າກ້າທີ່ເກີດແລ້ວວ່າກາຕົວໃດຫຼົບຊ່ອນຢູ່ໄດ້ກໍດີ
ກ່າວເຖິງຄົນຮັກທີ່ຈາກໄປຢູ່ແດນໄກກັບມາວ່າກາຕົວໃດບອກຂ່າວໃຫ້ກໍດີ
ກາຕົວນັ້ນເຮົານຳມາໃຫ້ທ່ານແລ້ວ ເຊີນເທີ້ນທ່ານພາມ
ທ່ານຈົ່ງບໍຣິໂພກຊີ້ນການັ້ນເທີ້ນ

(ປຸໂຣຫິດໂພທິສັດອ່ານໜັງສືແລ້ວຮູ້ວ່າພຣະຣາຊາຊົງຄິດເຖິງ ຈຶ່ງກ່າວວ່າ)

[໑໔໗] ເມື່ອໃດ ພຣະຣາຊາຊົງຣະນຶກເຖິງເຮົາເພື່ອຈະສົ່ງຊິ້ນການມາໃຫ້
ຊິ້ນຫົງກໍດີ ຊິ້ນນົກກະຮຽນກໍດີ ຊິ້ນນົກຍູງກໍດີ
ທີ່ເຮົານຳໄປຖວາຍແລ້ວ ເມື່ອນັ້ນເປັນຫຍັງຈະບໍ່ຣະນຶກເຖິງເຮົາ
ການບໍ່ຣະນຶກເຖິງເຮົາເລີຍຈະເປັນຄວາມຊົ່ວຊາມ

**ປຸນນະນະທີຊາດົກທີ ໔ ຈົບ**

## ໕. ກັດສະປະຊາດົກ (໔໑໕)
## ວ່າດ້ວຍເຕົ່າ

(ອຳມາດໂພທິສັດຜູ້ອະນຸສາດ ອັດຖະແລະທຳແກ່ພຣະຣາຊາໄດ້ຂາບທູນວ່າ)

[໑໔໙] ເຕົ່າພໍອ້າປາກຈະເວົ້າ ໄດ້ຂ້າຕົນແລ້ວນໍ
ເມື່ອຄາບທ່ອນໄມ້ຢູ່ກໍດີແລ້ວ
ກັບຂ້າຕົນເອງດ້ວຍຄຳເວົ້າຂອງຕົນເອງ

[໑໕໐] ຂ້າແດ່ ພຣະອົງຜູ້ປະເສີດທີ່ສຸດໃນໝູ່ວີຣະຊົນ
ນໍຣະຊົນຜູ້ເປັນບັນດິດເຫັນເຫດນີ້ແລ້ວ
ຄວນເວົ້າໃຫ້ດີ ບໍ່ຄວນເວົ້າໃຫ້ເກີນເວລາ
ຊົງທອດພຣະເນດເທີ້ນ ຂ້ານ້ອຍ
ເຕົ່າເຖິງຄວາມພິນາດຍ້ອນການເວົ້າຫຼາຍ

**ກັດສະປະຊາດົກທີ ໕ ຈົບ**

## ໖. ມັດສະຊາດົກ (໔໑໖)
## ວ່າດ້ວຍປາ

(ປາຕົວຜູ້ຮ້ອງລຳພັນເຖິງປາຕົວເມຍວ່າ)

[໑໕໑] ໄຟນີ້ກໍເຜົາເຮົາໃຫ້ຮ້ອນຮົນບໍ່ໄດ້
ຫຼາວແຫຼມທີ່ສ້ຽມຖືກແລ້ວກໍທຳຄວາມທຸກທໍລະມານໃຫ້ເກີດແກ່ເຮົາບໍ່ໄດ້
ເໝືອນເລື້ອງທີ່ນາງປາເຂົ້າໃຈເຮົາວ່າໄປຍິນດີກັບນາງປາຕົວອື່ນເລີຍ

[໑໓໒] ໄຟຄືຣາຄະນັ້ນເຜົາເຮົາໃຫ້ຮ້ອນຮົນ
ຈິດຂອງເຮົາເອງບຽດບຽນເຮົາໃຫ້ລຳບາກ
ພານແຫທັງຫຼາຍ ຂໍພວກທ່ານຈົ່ງປ່ອຍເຮົາໄປເທີ້ນ
ສັດຜູ້ຕົກຢູ່ໃນອຳນາດແຫ່ງການມະຄຸນ
ພວກທ່ານບໍ່ຄວນຂ້າບໍ່ວ່າໃນການໃດ ໆ

**ມັດສະຊາດົກທີ ໖ ຈົບ**

## ໗. ເສກຄຸຊາດົກ (໘໑໗)
## ວ່າດ້ວຍນາງເສກຄຸ

(ອຸປາສິກາໄດ້ກ່າວກັບລູກສາວຜູ້ກຳລັງຄ່ຳຄວນຢູ່ວ່າ)

[໑໓໓] ສັດໂລກທັງໝົດມີຄວາມພໍໃຈໃນການເສບການ
ນາງເສກຄຸເອີຍ ເຈົ້າບໍ່ຮູ້ເລື້ອງຂອງຊາວບ້ານ
ນາງເດັກນ້ອຍ ການທີ່ເຈົ້າຖືກພໍ່ຈັບມືໃນປ່າໃຫຍ່
ແລ້ວຮ້ອງໄຫ້ຄ່ຳຄວນນັ້ນ
ມັນເປັນແນວໃດສຳລັບເຈົ້າໃນວັນນີ້

(ກຸມາຣີຟັງຄຳນັ້ນແລ້ວຄ່ຳຄວນກ່າວວ່າ)

[໑໓໔] ຍາມເມື່ອເຮົາມີຄວາມທຸກ ຄົນທີ່ເປັນບ່ອນເພິ່ງຄືບິດາຂອງເຮົາເອງ
ແຕ່ກັບປະທຸດສະຮ້າຍເຮົາໃນປ່າ
ເຮົາຈະຄ່ຳຄວນຫາໃຜນໍໃນທ່າມກາງປ່າ
ຄົນທີ່ຈະຊ່ອຍເຫຼືອເຮົາໄດ້ກັບເຮັດກຳທີ່ໜ້າອາຍສາເອງ

**ເສກຄຸຊາດົກທີ ໗ ຈົບ**

## ໘. ກູຕະວານິຊະຊາດົກ (໘໑໘)
## ວ່າດ້ວຍພໍ່ຄ້າໂກງ

(ອຳມາດໂພທິສັດຜູ້ພິພາກສາຮູ້ວ່າພໍ່ຄ້າບ້ານນອກຄິດໂກງ ເມື່ອຈະແກ້ເອົາຊະນະຄົນໂກງ ຈຶ່ງກ່າວວ່າ)

[໑໓໕] ການທີ່ທ່ານຄິດສໍ້ສົນຕໍ່ບຸກຄົນຜູ້ສໍ້ສົນເປັນການຄິດທີ່ດີແລ້ວ

ການໂກງຕອບບຸກຄົນຜູ້ໂກງທ່ານເຮັດຕອບແລ້ວ
ຖ້າໜູທັງຫຼາຍເພິ່ງຫຍໍ້າກິນຜານໄດ້
ເປັນຫຍັງນົກແຫຼວທັງຫຼາຍຈະເພິ່ງແສ່ວເດັກໄປບໍ່ໄດ້

[໑໓໖] ດ້ວຍວ່າ ຄົນໂກງໂກງຕອບຄົນໂກງມີຢູ່ຫຼາຍໃນໂລກ
ຄົນອື່ນຜູ້ລໍ້ລວງຕອບຄົນລໍ້ລ່ວງ ກໍມີຢູ່ຄືກັນ
ທ່ານຜູ້ມີບຸດຫາຍ ທ່ານຈົ່ງໃຫ້ຜານແກ່ຄົນທີ່ມີຜານຫາຍເທີ້ນ
ຂໍຄົນຜູ້ມີຜານຫາຍຢ່າໄດ້ລັກພາບຸດຂອງທ່ານໄປເລີຍ

**ກູຕະວານິຊະຊາດົກທີ ໗ ຈົບ**

## ໗. ຄະຣະຫິຕະຊາດົກ (໔໑໗)
## ວ່າດ້ວຍຜູ້ຄອງເຮືອນຖືກພະຍາວານອນຕິຕຽນ

(ພະຍາວານອນໂພທິສັດໄດ້ກ່າວກັບພວກ ວານອນ ວ່າ)

[໑໓໗] ມະນຸດທັງຫຼາຍຜູ້ມີປັນຍາຊາມ ບໍ່ເຫັນອະຣິຍະທຳ
ກ່າວກັນແນວນີ້ວ່າ ເງິນຂອງເຮົາ ຄຳຂອງເຮົາ ທັງຄືນທັງວັນ

[໑໓໘] ໃນເຮືອນຫຼັງໜຶ່ງມີເຈົ້າຂອງເຮືອນຢູ່ ໔ ຄົນ
ໃນ ໔ ຄົນນັ້ນ ຄົນໜຶ່ງບໍ່ມີໜວດ ນົມຍານ
ເກົ້າຜົມມວຍ ແລະເຈາະຫູ ຖືກຊື້ມາດ້ວຍຊັບເປັນຈຳນວນຫຼາຍ
ຊາຍເຈົ້າຂອງເຮືອນນັ້ນເວົ້າສຽດແທງຊົນນັ້ນຕັ້ງແຕ່ວັນທີ່ມາເຖິງ

**ຄະຣະຫິຕະຊາດົກທີ ໗ ຈົບ**

## ໑໐. ທຳມັດທະຊະຊາດົກ (໔໔໐)
## ວ່າດ້ວຍຜູ້ມີທຳເປັນທຸງໄຊ

(ທ້າວສັກກະຕັດຖາມປຸໂຣຫິດໂພທິສັດວ່າ)

[໑໓໗] ທ່ານເບິ່ງຄືຢູ່ເປັນສຸກ ທ່ານຈາກບ້ານເມືອງມາສູ່ປ່າແຫ້ງແລ້ງ
ນັ່ງເພ່ງພິນິດຄິດອັນໃດຢູ່ຜູ້ດຽວຢູ່ເຫງົ້າໄມ້ ເໝືອນຄົນກຳພ້າ

(ປຸໂຣຫິດໂພທິສັດກ່າວວ່າ)

[໑໔໐] ຂ້າພະເຈົ້າມີຊີວິດຢູ່ຢ່າງເປັນສຸກ
ຂ້າພະເຈົ້າຈາກບ້ານເມືອງມາສູ່ປ່າແຫ້ງແລ້ງ
ທວນຣະນຶກເຖິງທຳຂອງສັດຕະບຸຣຸດ
ນັ່ງພິນິດຄິດຢູ່ແຕ່ຜູ້ດຽວຢູ່ເຫງົ້າໄມ້ ເໝືອນຄົນກຳພ້າ

**ທຳມັດທະຊະຊາດົກທີ ໑໐ ຈົບ**

**ພິຣະນະຖຳພະກະວັກທີ ໗ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ໂສມະທັດຕະຊາດົກ
໒. ພະຣຸຣາຊະຊາດົກ
໓. ກັດສະປະຊາດົກ
໗. ເສກຄຸຊາດົກ
໙. ຄະຣະທິຕະຊາດົກ
໔. ອຸດສິດຖະພັດຕະຊາດົກ
໘. ປຸນນະນະທີຊາດົກ
໖. ມັດສະຊາດົກ
໘. ກູຕະວານິຊະຊາດົກ
໑໐. ທຳມັດທະຊະຊາດົກ

# ໘. ກາສາວະວັກ

## ໝວດວ່າດ້ວຍຜ້າກາສາວະພັດ

## ໑. ກາສາວະຊາດົກ (໔໘໑)

## ວ່າດ້ວຍຜ້າກາສາວະພັດ

(ພະຍາຊ້າງໂພທິສັດໄດ້ຕິຕຽນມະນຸດທຸກໄຮ້ທີ່ນຸ່ງຫົ່ມຜ້າກາສາວະພັດວ່າ)

[໑໔໑] ຜູ້ໃດມີກິເລດຄືນ້ຳຝາດຍັງບໍ່ໝົດໄປ
ປາສະຈາກທະມະແລະສັດຈະ ຈັກນຸ່ງຫົ່ມຜ້າກາສາວະພັດ
ຜູ້ນັ້ນບໍ່ສົມຄວນຈະນຸ່ງຫົ່ມຜ້າກາສາວະພັດເລີຍ

[໑໔໘] ສ່ວນຜູ້ໃດຄາຍກິເລດຄືນ້ຳຝາດໄດ້ແລ້ວ
ຕັ້ງໝັ້ນດ້ວຍດີໃນສິນທັງຫຼາຍ ປະກອບດ້ວຍທະມະແລະສັດຈະ
ຜູ້ນັ້ນສົມຄວນຈະນຸ່ງຫົ່ມຜ້າກາສາວະພັດ

**ກາສາວະຊາດົກທີ ໑ ຈົບ**

# ໘. ຈູລະນັນທິຍະຊາດົກ (໔໘໘)
## ວ່າດ້ວຍພະຍາວານອນຈູລະນັນທິຍະ

(ບຸຣຸດຊົ່ວຖືກແຜ່ນດິນສູບຣະນຶກເຖິງໂອວາດຂອງອາຈານໄດ້ ຈຶ່ງກ່າວລຳພັນວ່າ)

[໑໘໓] ທ່ານອາຈານປາຣາສະຣິຍະໄດ້ກ່າວຄຳໃດໄວ້ວ່າ
ທ່ານຢ່າໄດ້ທຳຄວາມຊົ່ວທີ່ເຮັດແລ້ວຈະເຮັດຕົນໃຫ້ເດືອດຮ້ອນໃນພາຍຫຼັງ
ຄຳນີ້ເປັນຄຳຂອງອາຈານ

[໑໘໔] ຄົນເຮັດກຳໃດໄວ້ຍ່ອມເຫັນກຳນັ້ນໃນຕົນ
ຄົນເຮັດກຳດີຍ່ອມໄດ້ຮັບຜົນດີ
ຄົນເຮັດກຳຊົ່ວຍ່ອມໄດ້ຮັບຜົນຊົ່ວ
ຄົນຫວ່ານພືດເຊັ່ນໃດຍ່ອມໄດ້ຮັບຜົນເຊັ່ນນັ້ນ

**ຈູລະນັນທິຍະຊາດົກທີ ໘ ຈົບ**

# ໙. ປຸຕະພັດຕະຊາດົກ (໔໘໙)
## ວ່າດ້ວຍຫໍ່ເຂົ້າເປົ່າ

(ອຳມາດໂພທິສັດຜູ້ອະນຸສາດອັດຖະທຳແກ່ພຣະຣາຊາໄດ້ຂາບທູນພຣະເທວີວ່າ)

[໑໘໕] ບຸກຄົນຄວນນອບນ້ອມແກ່ຜູ້ທີ່ນອບນ້ອມ
ຄວນຄົບຜູ້ທີ່ຄົບດ້ວຍ ຄວນເຮັດກິດແກ່ຜູ້ທີ່ຊ່ອຍເຮັດກິດ
ຜູ້ປາຖະໜາສິ່ງທີ່ບໍ່ເປັນປະໂຫຍດ
ແລະບໍ່ຄວນຄົບແມ່ນຜູ້ທີ່ບໍ່ປະສົງຈະຄົບນຳ

[໑໘໖] ຄວນລະຖິ້ມຜູ້ທີ່ລະຖິ້ມ ແລະບໍ່ຄວນທຳຄວາມມີເຍື່ອໃຍ
ບໍ່ຄວນຄົບກັບຜູ້ມີຈິດໃຈເຫີນຫ່າງ
ຄວນແນມຫາຜູ້ອື່ນ (ທີ່ມີຄວາມເຍື່ອໃຍ)
ເໝືອນນົກຮູ້ວ່າ ຕົ້ນໄມ້ນີ້ໝາກໝົດແລ້ວໄປສູ່ຕົ້ນໄມ້ອື່ນ
ເພາະວ່າໂລກນີ້ກວ້າງໃຫຍ່

**ປຸຕະພັດຕະຊາດົກທີ ໙ ຈົບ**

## ໔. ກຸມພິລະຊາດົກ (໔໔໔)
### ວ່າດ້ວຍແຂ້ສັນເສີນພະຍາວານອນ

(ພຣະໂພທິສັດໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໑໔໗] ພະຍາວານອນ ຜູ້ໃດມີທຳ ໔ ປະການນີ້ ຄື
(໑) ສັດຈະ (໒) ທຳມະ (໓) ທິຕິ (໔) ຈາຄະ ເຊັ່ນກັບທ່ານ
ຜູ້ນັ້ນຍ່ອມຄອບງຳສັດຕູທີ່ຕົນພົບເຫັນໄດ້

[໑໔໘] ສ່ວນຜູ້ໃດບໍ່ມີຄຸນນະທຳອັນເປັນເຄື່ອງໃຫ້ຈະເລີນຢ່າງຍິ່ງ
໔ ປະການນີ້ ຄື (໑) ສັດຈະ (໒) ທຳມະ (໓) ທິຕິ (໔) ຈາຄະ
ຜູ້ນັ້ນຍ່ອມຄອບງຳສັດຕູທີ່ຕົນພົບເຫັນບໍ່ໄດ້

**ກຸມພິລະຊາດົກທີ ໔ ຈົບ**

## ໕. ຂັນຕິວັນນະນະຊາດົກ (໔໔໕)
### ວ່າດ້ວຍການພັນນາຂັນຕິ

(ອຳມາດຄົນໜຶ່ງບໍ່ອາດອົດກັ້ນຄວາມຜິດຂອງຕົນໄດ້ ຈຶ່ງທູນຖາມພຣະຣາຊາວ່າ)

[໑໔໙] ຂ້າແດ່ສົມມຸດຕິເທບ ຂ້າພຣະອົງມີຄົນທີ່ຂວນຂວາຍ
ໃນກິດຈະການທຸກຢ່າງຢູ່ຄົນໜຶ່ງ
ແຕ່ເຂົາມີຄວາມຜິດຢູ່ເລື້ອງໜຶ່ງ
ພຣະອົງຈະຊົງດຳຣິເປັນປະການໃດ
ໃນຄວາມຜິດນັ້ນ ຂ້ານ້ອຍ

(ພຣະຣາຊາຕັດວ່າ)

[໑໕໐] ເຮົາກໍມີຄົນເຊັ່ນນີ້ຢູ່ຄົນໜຶ່ງ ແລະເຂົາກໍຜາກົດຢູ່ບ່ອນນີ້
ຂຶ້ນຊື່ວ່າຄົນທີ່ພ້ອມດ້ວຍອົງຄຸນທຸກຢ່າງຫາໄດ້ຍາກ
ເຮົາຈຶ່ງພໍໃຈຂັນຕິ

**ຂັນຕິວັນນະນະຊາດົກທີ ໕ ຈົບ**

## ຝ. ໂກສິຍະຊາດົກ (໔໘໖)
## ວ່າດ້ວຍຜູ້ຮູ້ການຄວນບໍ່ຄວນເໝືອນນົກເຄົ້າ

(ບັນດິດໂພທິສັດຂາບທູນຂໍ້ຄວາມນີ້ແກ່ພຣະຣາຊາວ່າ)

[໑໕໑] ຂຶ້ນຊື່ວ່າການອອກໄປຈາກບ່ອນຢູ່ອາໄສໃນການອັນສົມຄວນເປັນການດີ
ສ່ວນການອອກໄປໃນການອັນບໍ່ສົມຄວນບໍ່ເປັນການດີ
ເພາະວ່າຊົນຈຳນວນຫຼາຍທີ່ເປັນສັດຕູເຮັດຄົນພຽງຄົນດຽວ
ທີ່ອອກຈາກບ່ອນຢູ່ອາໄສໂດຍການອັນບໍ່ສົມຄວນ
ແລ້ວບໍ່ຍັງປະໂຫຍດອັນໃດ ໃຫ້ເກີດຂຶ້ນ ໃຫ້ເຖິງຄວາມພິນາດ
ເໝືອນໝູ່ນົກກາທຳລາຍນົກເຄົ້າຕົວດຽວໃຫ້ພິນາດ

[໑໕໘] ນັກປາດຮູ້ຊຶ້ງເຖິງວິທີການຕ່າງ ໆ
ເຂົ້າໃຈເຖິງຊ່ອງທາງຂອງຄົນເຫຼົ່າອື່ນ
ເຮັດພວກສັດຕູທັງໝົດໃຫ້ຢູ່ໃນອຳນາດແລ້ວ
ເພິ່ງຢູ່ເປັນສຸກເໝືອນນົກເຄົ້າຜູ້ສະຫຼາດ

**ໂກສິຍະຊາດົກທີ ຝ ຈົບ**

## ກ. ຄູຖະປານະກະຊາດົກ (໔໘ກ)
## ວ່າດ້ວຍໝອນທ້າຊ້າງສູ້

(ໝອນຮ້ອງຮຽກຊ້າງວ່າ)

[໑໕໓] ທ່ານກໍເປັນຜູ້ກ້າຫານມາພົບກັບເຮົາຜູ້ກ້າຫານ
ຜູ້ສາມາດທີ່ຈະປະຫານໄດ້ໂດຍບໍ່ຍາກ
ພະຍາຊ້າງ ທ່ານຈົ່ງກັບມາກ່ອນ ທ່ານຢ້ານເຮົາບໍ ຈຶ່ງໜີໄປ
ຂໍໃຫ້ຊົນຊາວແຄວ້ນອັງຄະແລະມະຄົດ
ຈົ່ງເຫັນຄວາມກ້າຫານຂອງເຮົາແລະທ່ານເທີ້ນ

(ຊ້າງເມື່ອຈະຣຸກຮົບກັບໝອນນັ້ນ ຈຶ່ງໄດ້ກ່າວວ່າ)

[໑໕໔] ເຮົາຈັກບໍ່ໃຊ້ຂາ ງາ ແລະງວງຂ້າເຈົ້າ ເຮົາຈັກໃຊ້ຄູດຂ້າເຈົ້າ
ເຈົ້າໝອນໃນຄູດເນົ່າຈົ່ງຖືກຂອງເນົ່າຂ້າເທີ້ນ

**ຄູຖະປານະກະຊາດົກທີ ກ ຈົບ**

## ໗. ກາມະນີຕະຊາດົກ (໔໔໗)
## ວ່າດ້ວຍຄົນທີ່ຖືກຄວາມຢາກຄອບງຳ

(ພຣະຣາຊາຕັດກັບທ້າວສັກກະເທວະຣາດໂພທິສັດວ່າ)

[໑໕໕] ເຮົາຢາກໄດ້ພຣະນະຄອນທັງ ໓ ແລະຣັດທັງ ໓
ຄື (໑) ປັນຈາລະ (໔) ກຸຣຸຍະ (໓) ເກກະ
ໃນລະຫວ່າງພຣະນະຄອນເຫຼົ່ານັ້ນ ພໍ່ພາມເອີຍ
ເຮົາຢາກໄດ້ຍິ່ງກວ່າຣາດຊະສົມບັດທີ່ເຮົາໄດ້ແລ້ວສາອີກ
ເຈົ້າຈົ່ງບຳລຸງຂ້າພະເຈົ້າຜູ້ຖືກຄວາມຢາກທຳລາຍແລ້ວເທີ້ນ

(ທ້າວສັກກະເທວະຣາດໂພທິສັດຕັດກັບພຣະຣາຊາວ່າ)

[໑໕໖] ຈິງຢູ່ ຄົນຖືກງູເຫົ່າກັດ ໝໍບາງຄົນກໍຮັກສາໃຫ້ຫາຍໄດ້
ຄົນຖືກຜີສິງ ໝໍຜີທີ່ເກັ່ງບາງຄົນກໍຂັບອອກໄດ້
ແຕ່ຄົນຖືກຄວາມຢາກທຳລາຍ ໃຜ ໆ ກໍບຳລຸງບໍ່ໄດ້
ເພາະວ່າ ຄົນທີ່ລ່ວງເລີຍກຸສົນທຳແລ້ວຈະບຳລຸງໄດ້ແນວໃດ

**ກາມະນີຕະຊາດົກທີ ໗ ຈົບ**

## ໘. ປະລາຍິຕະຊາດົກ (໔໔໘)
## ວ່າດ້ວຍການຂັບໄລ່ສັດຕູແບບສາຍຟ້າແມບ

(ພຣະເຈົ້າພົມມະທັດໂພທິສັດຊົງດຳຣິຈະຍຶດເອົາເມືອງຕັກກະສິລາ ຈຶ່ງຕັດວ່າ)

[໑໕໗] ຕັກກະສິລາຖືກກອງທັບຊ້າງອັນຍິ່ງໃຫຍ່
ຖືກກອງທັບມ້າສິນທົບອັນຍິ່ງໃຫຍ່
ຖືກກອງທັບລົດຄືກັບກຽວຄື້ນໃນມະຫາສະມຸດ
ອັນຍັງຫ່າຝົນຄືລູກສອນໃຫ້ຕົກລົງຄືກັບເມກຝົນອັນໜາທຶບ
ຖືກກອງທັບທະຫານຣາບເຊິ່ງຖືດາບກວັດແກວ່ງປະຫານໄດ້ຢ່າງແມ່ນຢຳ
ລ້ອມເອົາໄວ້ຮອບດ້ານ

[໑໕໘] ທ່ານທັງຫຼາຍຈົ່ງຮີບຮຸກເຂົ້າໄປ ຈົ່ງຮີບບຸກເຂົ້າໄປ
ຈົ່ງໂຫ່ຮ້ອງໃຫ້ອຶກກະທຶກກຶກກ້ອງພ້ອມກັບພະຍາຊ້າງທີ່ປະເສີດ

ໃນວັນນີ້ ຄືກັບສາຍອະສະນີບາດອັນແຜ່ຊ່ານ
ອອກຈາກເມກຄຳຣາມກຶກກ້ອງຢູ່

**ປະລາຍິຕະຊາດົກທີ ໙ ຈົບ**

## ໑໐. ທຸຕິຍະປະລາຍິຕະຊາດົກ (໔໓໐)
## ວ່າດ້ວຍການຂັບໄລ່ສັດຕູແບບສາຍຟ້າແມບເລື້ອງທີ ໔

(ພຣະເຈົ້າຄັນທາຣະໄດ້ຕັດສັນເສີນກອງທັບຂອງພຣະອົງວ່າ)

[໑໕໙] ທຸງສຳລັບລົດຂອງເຮົາມີຫຼວງຫຼາຍບໍ່ແມ່ນໜ້ອຍ
ເຖິງພົນພາຫະນະກໍກຳນົດນັບບໍ່ໄດ້
ຍາກທີ່ສັດຕູໃດ ໆ ຈະຄອບງຳຍ່ຳຍີໄດ້
ຄືສະມຸດສາຄອນຍາກທີ່ຝູງກາຈະບິນຂ້າມພົ້ນໄດ້
ອັນໜຶ່ງ ກອງທັບຂອງເຮົານີ້ກໍຍາກທີ່ກອງທັບອື່ນຈະຄອບງຳຍ່ຳຍີໄດ້
ຄືພູເຂົາອັນລົມບໍ່ສາມາດຈະພັດໃຫ້ຫວັ່ນໄຫວໄດ້
ວັນນີ້ ເຮົານັ້ນມີກຳລັງເຫັນປານນີ້
ຍາກທີ່ພຣະຣາຊາເຊັ່ນທ່ານຈະຄອບງຳຍ່ຳຍີໄດ້

(ພຣະຣາຊາເມືອງພາຣານະສີໂພທິສັດຊົງຂູ່ຂວັນພຣະເຈົ້າຄັນທາຣະວ່າ)

[໑໖໐] ທ່ານຢ່າເວົ້າພ່ຳເພີ້ເຖິງຄວາມທີ່ຕົນເປັນຄົນພານໄປເລີຍ
ເພາະວ່າພຣະຣາຊາເຊັ່ນທ່ານບໍ່ສາມາດຈະຍຶດເອົາຣາດຊະສົມບັດໄດ້
ເພາະທ່ານຖືກຄວາມຮ້ອນຮົນ ແຜດເຜົາຢູ່ສະເໝີ
ດັ່ງນັ້ນ ຈຶ່ງຂົ່ມຂີ່ຄອບງຳພຣະຣາຊາເຊັ່ນເຮົາບໍ່ໄດ້
ທ່ານນັ້ນຄືກັບເຂົ້າໄປໃກ້ຄົດຊະສານຕົກມັນທີ່ທ່ຽວພ່ານໄປພຽງຕົວດຽວ
ເຊິ່ງຈັກບົດບີບທ່ານໃຫ້ແຫຼກລານເໝືອນຢຽບຢ່ຳພົງອໍ້ໃຫ້ເປັນຈຸນໄປ

**ທຸຕິຍະປະລາຍິຕະຊາດົກທີ ໑໐ ຈົບ**

**ກາສາວະວັກທີ ໗ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື



# ໕. ອຸປາຫະນະວັກ

## ໝວດວ່າດ້ວຍອຸປະມາດ້ວຍເກີບ

## ໑. ອຸປາຫະນະຊາດົກ (໔໓໑)

## ວ່າດ້ວຍການໃຊ້ສິລະປະໃນທາງທີ່ຜິດກໍ່ໃຫ້ເກີດໂທດເໝືອນເກີບກັດ

(ນາຍຄວານຊ້າງໂພທິສັດຂາບທູນພຣະຣາຊາວ່າ)

[໑໗໑] ເກີບທີ່ຄົນຊື້ມາເພື່ອຕ້ອງການຄວາມສະບາຍຕີນ
ກັບນໍາທຸກມາໃຫ້
ເກີບນັ້ນຖືກຄວາມຮ້ອນແຜດເຜົາ
ຖືກພື້ນຄູດສີ ຍ່ອມກັດຕີນຄົນຜູ້ນັ້ນສັນໃດ

[໑໗໔] ຜູ້ໃດເກີດໃນຕະກູນຕໍ່າ ບໍ່ແມ່ນອາຣະຍະຊົນ
ຮຽນສິລະປະວິທະຍາໃນສໍານັກຂອງອາຈານແລ້ວ
ຜູ້ນັ້ນຍ່ອມຂ້າຕົນເອງດ້ວຍສິລະປະວິທະຍາທີ່ຮຽນມາ
ໃນສໍານັກຂອງອາຈານນັ້ນ ສັນນັ້ນ
ບຸກຄົນນັ້ນບັນດິດຮຽກວ່າ ອະນາລະຍະຊົນ
ປຽບດ້ວຍເກີບທີ່ເຮັດມາບໍ່ດີ

**ອຸປາຫະນະຊາດົກທີ ໑ ຈົບ**

## ໔. ວີນາຖູນະຊາດົກ (໔໓໔)

## ວ່າດ້ວຍຊາຍຫຼັງຄ່ອມນອນຂົດເໝືອນຄັນພິນ

(ເສດຖີໂພທິສັດສົນທະນາກັບທິດາເສດຖີວ່າ)

[໑໗໓] ເຈົ້າຄົນດຽວທີ່ນັ້ນທີ່ຄິດແນວນີ້
ຊາຍຫູ້ງຄ່ອມຜູ້ໂງ່ຈ້າຄົນນີ້ບໍ່ອາດຈະເປັນຜູ້ນໍາໄດ້
ນາງຜູ້ຈະເລີນ ເຈົ້າບໍ່ຄວນຈະຮ່ວມທາງກັບຄົນຫູ້ງຄ່ອມຄົນນີ້ເລີຍ

(ທິດາເສດຖີຟັງຄໍາຂອງພຣະໂພທິສັດແລ້ວວ່າ)

[໑໗໔] ຂ້ານ້ອຍເຂົ້າໃຈວ່າຊາຍຫູ້ງຄ່ອມເປັນຄົນອົງອາດ ຈຶ່ງໄດ້ຮັກແພງເຂົາ
ເຂົານອນຂົດຢູ່ແນວນີ້ ຄືຄັນພິນທີ່ສາຍຂາດ

**ວີນາຖູນະຊາດົກທີ ໘ ຈົບ**

## ໓. ວິກັນນະກະຊາດົກ (໘໓໓)
## ວ່າດ້ວຍການມະຄຸນປຽບເໝືອນຫອກ

(ເຈົ້າໜ້າທີ່ຈັດອາຫານເວົ້າກັບແຂ້ວ່າ)

[໑໗໕] ເຈົ້າຈົ່ງໄປໃນສະຖານທີ່ທີ່ເຈົ້າປາຖະໜາເທີ້ນ
ເຈົ້າຖືກຫອກແທງບ່ອນສໍາຄັນ
ອັນໜຶ່ງ ເຈົ້າທໍລະມານ ຫິວ ຢາກກິນໃນອາຫານ
ເຝົ້າຕິດຕາມຝູງປາຢູ່ ຖືກອາຫານກໍາຈັດສາແລ້ວ

(ພຣະສາດສະດາເມື່ອຊົງສະແດງຊາດົກນີ້ແລ້ວ ຈຶ່ງຕັດວ່າ)

[໑໗໖] ບຸກຄົນຜູ້ໄປຕາມໂລກາມິດແນວນີ້
ອະນຸວັດຕາມອໍານາດຈິດຍ່ອມເດືອດຮ້ອນ
ບຸກຄົນນັ້ນຍ່ອມເດືອດຮ້ອນທ່າມກາງໝູ່ຍາດມິດສະຫາຍ
ເໝືອນແຂ້ທີ່ກໍາລັງຕິດຕາມຝູງປາຖືກຫອກແທງ

**ວິກັນນະກະຊາດົກທີ ໓ ຈົບ**

## ໔. ອະສິຕາພູຊາດົກ (໘໓໔)
## ວ່າດ້ວຍພຣະນາງອະສິຕາພູ

(ພຣະນາງອະສິຕາພູຕັດກັບພົມມະທັດຕະກຸມານວ່າ)

[໑໗໗] ພຣະອົງນັ້ນແລໄດ້ຊົງທໍາເຫດນີ້ໃນການນີ້

ຂ້ານ້ອຍປາສະຈາກຄວາມຮັກແພງໃນພຣະອົງສາແລ້ວ
ບັດນີ້ ຄວາມຮັກແພງນີ້ນັ້ນບໍ່ອາດຈະປະສານໄດ້ອີກ
ເໝືອນກັບງາຊ້າງທີ່ຖືກເລື່ອຍຂາດບໍ່ອາດຈະຕໍ່ຕິດກັນໄດ້ອີກຄືເກົ່າ

(ເມື່ອພຣະນາງສະເດັດຈາກໄປແລ້ວ ພົມມະທັດຕະກຸມານຈຶ່ງຄໍ່າຄວນວ່າ)

[໑໖໘] ບຸກຄົນຜູ້ປາຖະໜາເກີນປະມານຍ້ອນຄວາມໂລບເກີນໄປ
ແລະຍ້ອນຄວາມເມົາໃນຄວາມໂລບເກີນໄປຈຶ່ງເສື່ອມຈາກປະໂຫຍດຢ່າງນີ້
ເໝືອນຕົວເຮົາເສື່ອມຈາກພຣະນາງອະສິຕາພູ

**ອະສິຕາພູຊາດົກທີ ໔ ຈົບ**

## ໕. ວັດສະນະຂະຊາດົກ (໔໓໕)
## ວ່າດ້ວຍວັດສະນະຂະດາບົດ

(ເສດຖີເມືອງພາຣານະສີ ຊວນວັດສະນະຂະດາບົດໂພທິສັດບໍຣິໂພກການວ່າ)

[໑໖໙] ພຣະຜູ້ເປັນເຈົ້າວັດສະນະຂະ ເຮືອນທັງຫຼາຍທີ່ມີເງິນຄໍາບໍລິບູນ
ມີໂພຊະນາຫານຫຼາຍ ເປັນເຮືອນທີ່ມີຄວາມສຸກ
ເຊິ່ງພຣະຜູ້ເປັນເຈົ້າບໍ່ຕ້ອງຂວນຂວາຍກໍກິນ ດື່ມ ແລະນອນໄດ້ຢ່າງສະບາຍ

(ວັດສະນະຂະດາບົດໂພທິສັດຟັງເສດຖີແລ້ວ ໄດ້ກ່າວວ່າ)

[໑໗໐] ຄົນບໍ່ພະຍາຍາມເຮັດວຽກກໍຢູ່ຄອງເຮືອນບໍ່ໄດ້
ຄົນບໍ່ເວົ້າມຸສາກໍຢູ່ຄອງເຮືອນບໍ່ໄດ້
ຄົນປ່ອຍວາງອາດຍາບໍ່ລົງອາດຍາບຸກຄົນອື່ນກໍຢູ່ຄອງເຮືອນບໍ່ໄດ້
ເມື່ອເປັນເຊັ່ນນີ້ ການຈະຄອງເຮືອນ
ເພື່ອໃຫ້ເກີດຄວາມຍິນດີເປັນການໄດ້ແສນຍາກ

**ວັດສະນະຂະຊາດົກທີ ໕ ຈົບ**

## ໖. ພະກະຊາດົກ (໔໓໖)
## ວ່າດ້ວຍນົກຍາງເຈົ້າເລ້

(ຝູງປາເຫັນນົກຍາງຈຶ່ງກ່າວວ່າ)

[໑໗໑] ນົກຕົວນີ້ດີແທ້ນໍ ມີປີກເໝືອນດອກໂກມຸດ
ເກັບປີກທັງ ໔ ຈັບເຈົ່າຊົບເຊົາຢູ່

(ປາໂພທິສັດແນມເບິ່ງນົກຍາງນັ້ນແລ້ວ ຈຶ່ງກ່າວວ່າ)

[໑໗໔] ພວກເຈົ້າບໍ່ຮູ້ປົກກະຕິຂອງມັນ ເພາະບໍ່ຮູ້ຈຶ່ງພາກັນສັນເສີນ
ນົກຍາງຕົວນີ້ບໍ່ໄດ້ຄຸ້ມຄອງພວກເຮົາດອກ
ຍ້ອນເຫດນັ້ນ ມັນຈຶ່ງບໍ່ກາງປີກ

**ພະກະຊາດົກທີ ໖ ຈົບ**

## ໗. ສາເກຕະຊາດົກ (໔໖໗)
## ວ່າດ້ວຍຊົງຜາຣົບພານຊື່ສາເກດ

(ພິກຂຸທັງຫຼາຍທູນຖາມພຣະສາດສະດາວ່າ)

[໑໗໓] ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ເຫດໃດນໍ
ເມື່ອບຸກຄົນບາງຄົນໃນໂລກນີ້
ພໍພົບກັນເຂົ້າ ຈິດໃຈກໍເມີນເສີຍ
ແຕ່ບາງຄົນພໍພົບກັນເຂົ້າທີ່ນັ້ນ ຈິດກໍເຫຼື້ອມໃສ

(ພຣະສາດສະດາຊົງສະແດງເຫດແຫ່ງຄວາມຮັກແກ່ພິກຂຸເຫຼົ່ານັ້ນວ່າ)

[໑໗໔] ຄວາມຮັກນັ້ນເກີດດ້ວຍສາເຫດ ໒ ປະການ ຄື
(໑) ດ້ວຍການຢູ່ຮ່ວມກັນໃນຊາດປາງກ່ອນ
(໒) ດ້ວຍການເກື້ອກູນກັນແລະກັນໃນປັດຈຸບັນ
ເໝືອນດອກອຸບົນເກີດໃນນ້ຳ

**ສາເກຕະຊາດົກທີ ໗ ຈົບ**

## ໘. ເອກະປະທະຊາດົກ (໔໖໘)
## ວ່າດ້ວຍເຫດຢ່າງດຽວເຮັດໃຫ້ບັນລຸປະໂຫຍດໄດ້ຫຼາຍຢ່າງ

(ກຸມານນ້ອຍຜູ້ເປັນບຸດຂອງເສດຖີໂພທິສັດຖາມບິດາວ່າ)

[໑໗໕] ທ່ານພໍ່

ເຫດຢ່າງດຽວແຕ່ເຮັດໃຫ້ໄດ້ບັນລຸປະໂຫຍດຫຼາຍຢ່າງມີຢູ່ບໍ
ພວກເຮົາຈະເຮັດປະໂຫຍດຫຼາຍຢ່າງໃຫ້ສຳເລັດໄດ້ດ້ວຍເຫດຢ່າງໃດ
ຂໍທ່ານພໍ່ຈົ່ງບອກເຫດນັ້ນຈັກຢ່າງໜຶ່ງເຊິ່ງລວບລວມເຫດໄວ້ຫຼາຍ

(ບິດາບອກແກ່ກຸມານນ້ອຍນັ້ນວ່າ)

[໑໗໖] ລູກເອີຍ ເຫດອັນດຽວຄືຄວາມຂະຫຍັນ
ທີ່ເຮັດໃຫ້ໄດ້ບັນລຸປະໂຫຍດຫຼາຍຢ່າງ
ຍ້ອນຄວາມຂະຫຍັນອັນປະກອບດ້ວຍສິນ ເຂົ້າເຖິງຂັນຕິ
ອາດເຮັດໃຫ້ມິດສະຫາຍມີຄວາມສຸກ
ຫຼືອາດເຮັດໃຫ້ສັດຕູທັງຫຼາຍໄດ້ຮັບຄວາມທຸກ

**ເອກະປະທະຊາດົກທີ ໘ ຈົບ**

## ໙. ທະຣິຕະມາຕະຊາດົກ (໔໓໙)
## ວ່າດ້ວຍກົບຂຽວ

(ງູຈະຖາມກົບຂຽວໂພທິສັດວ່າ)

[໑໗໗] ພໍ່ກົບຂຽວ ຝູງປາຫຸ້ມກັດເຮົາຜູ້ມີພິດ
ເຊິ່ງເຂົ້າໄປສູ່ປາກລອບ ທ່ານພໍໃຈບໍ
(ກົບຂຽວໂພທິສັດໄດ້ກ່າວກັບງູວ່າ)

[໑໗໘] ຄົນກົດຂີ່ຂົ່ມເຫັງຜູ້ອື່ນຕະຫຼອດເວລາທີ່ຕົນເປັນໃຫຍ່
ເມື່ອຖືກຄົນອື່ນເຊິ່ງເປັນໃຫຍ່ກວ່າກົດຂີ່ຂົ່ມເຫງແດ່ກໍຈົ່ມວ່າ

**ທະຣິຕະມາຕະຊາດົກທີ ໙ ຈົບ**

## ໑໐. ມະຫາປິງຄະລະຊາດົກ (໔໔໐)
## ວ່າດ້ວຍພຣະເຈົ້າປິງຄະລະ

(ພຣະໂພທິສັດສະເຫວີຍພຣະຊາດເປັນພຣະໂອຣົດຂອງພຣະເຈົ້າປິງຄະລະ ຕັດຖາມຍາມຮັກສາປະຕູວ່າ)

[໑໗໙] ຊົນທັງມວນຖືກພຣະເຈົ້າປິງຄະລະບຽດບຽນ

ເມື່ອພຣະອົງສະຫວັນນະຄົດແລ້ວ ປະຊາຊົນພາກັນຍິນດີ
ນາຍທະວານບານ ພຣະເຈົ້າປິງຄະລະຜູ້ມີພຣະເນດບໍ່ດຳ
ເປັນທີ່ຮັກຂອງທ່ານບໍ ເປັນຫຍັງທ່ານຈຶ່ງຮ້ອງໄຫ້

(ຍາມຮັກສາປະຕູກ່າວທູນຕອບວ່າ)

[໑໙໐] ພຣະເຈົ້າປິງຄະລະຜູ້ມີພຣະເນດບໍ່ດຳ
ເປັນທີ່ຮັກຂອງຂ້າພະເຈົ້າກໍບໍ່ແມ່ນ
ແຕ່ຂ້າພະເຈົ້າຢ້ານການສະເດັດກັບມາຂອງພຣະອົງ
ເພາະວ່າເມືອພຣະອົງສະເດັດໄປຈາກບ່ອນນີ້ແລ້ວ
ຈະຕ້ອງໄປບຽດບຽນພະຍາມັດຈຸຣາດ
ເມືອພະຍາມັດຈຸຣາດຖືກພຣະອົງບຽດບຽນແລ້ວ
ຈະຕ້ອງຖືກສົ່ງກັບມາໃນບ່ອນນີ້ອີກຢ່າງແນ່ນອນ

(ພຣະໂພທິສັດຕັດປອບຍາມຮັກສາປະຕູວ່າ)

[໑໙໑] ພຣະເຈົ້າປິງຄະລະນັ້ນຖືກຖວາຍພຣະເພີງ
ດ້ວຍຟືນ ໑,໐໐໐ ເຫຼັ້ມກວຽນ
ພຣະອັດຖິກໍອາບດ້ວຍນ້ຳຕັ້ງ ໑໐໐ ໝໍ້
ສະຖານທີ່ຖວາຍພຣະເພີງກໍຖືກລ້ອມໄວ້ດີແລ້ວ
ບໍ່ຕ້ອງຢ້ານ ສະເດັດກັບມາບໍ່ໄດ້ດອກ

**ມະຫາປິງຄະລະຊາດົກທີ ໑໐ ຈົບ**

**ອຸປາຫະນະວັກທີ ໗ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

# ១០. ສີງຄາລະວັກ

## ໝວດວ່າດ້ວຍໝາຈອກ

## ໑. ສັບພະທາຖິຊາດົກ (໔໘໑)

## ວ່າດ້ວຍໝາຈອກໄດ້ເປັນໃຫຍ່ກວ່າສັດມີແຂ້ວງາທັງປວງ

(ພຣະສາດສະດາຊົງສະແດງພຣະທຳມະເທດສະໜາ ຕັດພຣະຄາຖາເຫຼົ່ານີ້ວ່າ)

[໑໗໘] ໝາຈອກມີນິໄສແຂງກະດ້າງ ມີຄວາມຕ້ອງການບໍລິວານ
ບັນລຸເຖິງສົມບັດອັນຍິ່ງໃຫຍ່
ເປັນຣາຊາແຫ່ງສັດມີແຂ້ວງາທັງປວງ ສັນໃດ

[໑໗໙] ບັນດາມະນຸດທັງຫຼາຍ ບຸກຄົນໃດມີບໍລິວານ
ບຸກຄົນນັ້ນກໍຊື່ວ່າເປັນໃຫຍ່ໃນບໍລິວານເຫຼົ່ານັ້ນ
ເໝືອນໝາຈອກເປັນໃຫຍ່ກວ່າສັດມີແຂ້ວງາທັງຫຼາຍ ສັນນັ້ນ

**ສັບພະທາຖິຊາດົກທີ ໑ ຈົບ**

## ໘. ສຸນະຂະຊາດົກ (໔໘໘)

## ວ່າດ້ວຍໝາສະຫຼາດເອົາຕົວລອດໄດ້

(ພຣະໂພທິສັດເກີດໃນຕະກູນມີໂພຄະສົມບັດຫຼາຍ ໄດ້ຍ່າງຜ່ານດົງໄປທຳທຸຣະບາງຢ່າງເຫັນ ໝາຖືກລ່າມໄວ້ ຈຶ່ງກ່າວວ່າ)

[໑໗໘] ໝາທີ່ບໍ່ກັດກິນເຊືອກໜັງນີ້ໂງ່ຫຼາຍ
ທຳມະດາບຸກຄົນຄວນຈະປົດຕົນຈາກເຄື່ອງຜູກ
ກິນແລ້ວກັບບ້ານ

(ໝາໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໗໕] ຄຳທີ່ທ່ານກ່າວນັ້ນຍັງຝັງໃຈຂ້າພະເຈົ້າ
ແລະຂ້າພະເຈົ້າຕັ້ງໃຈວ່າຈະຖ້າຈົນກວ່າຄົນຈະນອນຫຼັບ

**ສຸນະຂະຊາດົກທີ ໘ ຈົບ**

# ໓. ຄຸຕະຕິລະຊາດົກ (໔໘໓)
## ວ່າດ້ວຍຄຸຕະຕິລະໂພທິສັດ

(ນັກຂັບຮ້ອງໂພທິສັດກ່າວກັບທ້າວສັກກະວ່າ)

[໑໗໖] ຂ້າພຣະອົງໄດ້ສອນສິດໃຫ້ຮຽນການດີດພິນ ໆ ສາຍ
ມີສຽງອັນມ່ວນ ໜ້າຈັບຈິດຈັບໃຈ
ເຂົາກັບມາທ້າທາຍຂ້າພຣະອົງແຂ່ງຂັນດີດພິນສູ້ກັນເທິງເວທີ
ທ້າວໂກສີ ຂໍພຣະອົງຈົ່ງເປັນບ່ອນເພິ່ງຂອງຂ້າພຣະອົງດ້ວຍເທີ້ນ

(ທ້າວສັກກະສະດັບຄຳຂອງພຣະໂພທິສັດແລ້ວ ຈຶ່ງຕັດວ່າ)

[໑໗໗] ເພື່ອນເອີຍ ເຮົາຈະເປັນບ່ອນເພິ່ງ
ເຮົາເປັນຄົນບູຊາອາຈານ
ສິດຈັກຊະນະທ່ານບໍ່ໄດ້ ສ່ວນທ່ານຈະຊະນະສິດ ເດີ້ອາຈານ

**ຄຸຕະຕິລະຊາດົກທີ ໓ ຈົບ**

# ໔. ວິຄະຕິດສະຊາດົກ (໔໘໔)
## ວ່າດ້ວຍການນອບນ້ອມທ່ານຜູ້ໝົດຄວາມຕ້ອງການ

(ລືສີໂພທິສັດເມື່ອປະຣິພາຊົກໜີໄປແລ້ວ ຈຶ່ງສະແດງທຳແກ່ບໍລິສັດເຊິ່ງນັ່ງປະຊຸມກັນຢູ່ວ່າ)

[໑໗໘] ໄດ້ຍິນມາວ່າ ຄົນທີ່ບໍ່ປາຖະໜາສິ່ງທີ່ຕົນເຫັນກໍດີ
ປາຖະໜາສິ່ງທີ່ຕົນບໍ່ເຫັນກໍດີ
ຂ້າພະເຈົ້າເຂົ້າໃຈວ່າ ເຖິງເຂົາຈະທ່ຽວສະແຫວງຫາໄປນານແສນນານ
ກໍຈະບໍ່ໄດ້ສິ່ງທີ່ຕົນປາຖະໜາເລີຍ

[໑໗໙] ຄົນຍ່ອມບໍ່ພໍໃຈສິ່ງທີ່ຕົນໄດ້ມາ
ແລະດູໝິ່ນສິ່ງທີ່ຕົນປາຖະໜາໄດ້ມາແລ້ວ
ຍ້ອນຄວາມປາຖະໜາເຊິ່ງມີອາລົມບໍ່ມີທີ່ສິ້ນສຸດ
ຂ້າພະເຈົ້າຂໍທຳການນອບນ້ອມທ່ານຜູ້ປາສະຈາກຄວາມປາຖະໜາ

**ວິຄະຕິດສະຊາດົກທີ ໔ ຈົບ**

## ៥. ມູລະປະຣິຍາຍະຊາດົກ (໘໔៥)
## ວ່າດ້ວຍຊິງຜາບພິກຊຸຜູ້ທະນົງດ້ວຍມູລະປະຣິຍາຍະສູດ

(ອາຈານທິສາປາໂມກໂພທິສັດຖາມບັນຫາກັບພວກສິດແລ້ວ ຈຶ່ງກ່າວວ່າ)

[໑໗໐] ການເວລາຍ່ອມກິນເຫຼົ່າສັດທັງປວງພ້ອມກັບຕົວເອງ
ສ່ວນຜູ້ໃດກິນການເວລາໄດ້
ຜູ້ນັ້ນຊື່ວ່າເຜົາຕັນຫາທີ່ເຜົາເຫຼົ່າສັດໄດ້ແລ້ວ

(ພຣະໂພທິສັດຕິຕຽນມານົບເຫຼົ່ານັ້ນວ່າ)

[໑໗໑] ຫົວຂອງນໍຣະຊົນຜາກົດມີເປັນຈຳນວນຫຼາຍ
ແລະມີຜົມໜາປົກຄຸມຈົນຮອດຄໍ
ບັນດາຄົນເຫຼົ່ານີ້ ໃຜແດ່ນໍທີ່ມີປັນຍາ

**ມູລະປະຣິຍາຍະຊາດົກທີ ៥ ຈົບ**

## ៦. ພາໂລວາທະຊາດົກ (໘໔៦)
## ວ່າດ້ວຍການໂອວາດຄົນພານ

(ກຸດຸມພີຜູ້ໜຶ່ງແກ້ງຕິລີສີໂພທິສັດ ຈຶ່ງກ່າວກັບພຣະໂພທິສັດວ່າ)

[໑໗໘] ບຸກຄົນຜູ້ບໍ່ສັງລວມປະຫານສັດກໍດີ
ບຽດບຽນສັດກໍດີ ຂ້າສັດກໍດີ ແລ້ວໃຫ້ທານ
ສະມະນະໃດບໍຣິໂພກອາຫານເຊັ່ນນີ້
ສະມະນະນັ້ນຍ່ອມແປດເປື້ອນບາບດ້ວຍ

(ພຣະໂພທິສັດຟັງແລ້ວ ຈຶ່ງກ່າວວ່າ)

[໑໗໙] ບຸກຄົນຜູ້ບໍ່ສັງລວມເຖິງຈະຂ້າບຸດພັນລະຍາແລ້ວໃຫ້ທານກໍຕາມ
ຜູ້ມີປັນຍາບໍຣິໂພກອາຫານນັ້ນກໍບໍ່ແປດເປື້ອນບາບເລີຍ

**ພາໂລວາທະຊາດົກທີ ៦ ຈົບ**

# ໗. ປາທັນຊະລິຊາດົກ (໔໘໗)
## ວ່າດ້ວຍປາທັນຊະລິຣາດຊະກຸມານ

(ອຳມາດໂພທິສັດເຂົ້າໃຈວ່າ ພຣະຣາດຊະກຸມານສະຫລຽວສະຫຼາດ ຈຶ່ງກ່າວວ່າ)

[໑໙໔] ປາທັນຊະລິຣາດຊະກຸມານມີພຣະປີຊາ
ຊົງຮຸ່ງເຮື່ອງກວ່າພວກເຮົາທັງໝົດແນ່ນອນ
ພຣະອົງຊົງເຫັນເຫດອື່ນທີ່ຍິ່ງກວ່ານີ້ແນ່
ເພາະສະນັ້ນຈຶ່ງຊົງເມັ້ມພຣະໂອດ

(ພຣະກຸມານໂງ່ຈ້ຳ ກ່າວວ່າ)

[໑໙໕] ປາທັນຊະລິຣາດຊະກຸມານພຣະອົງນີ້
ຈະຊົງຮູ້ສິ່ງທີ່ເປັນທຳຫຼືບໍ່ເປັນທຳ
ສິ່ງທີ່ເປັນປະໂຫຍດແລະບໍ່ເປັນປະໂຫຍດກໍບໍ່ແມ່ນ
ພຣະອົງບໍ່ຊົງຮູ້ອັນໃດເລີຍ
ນອກຈາກການເມັ້ມພຣະໂອດທໍ່ນັ້ນ

**ປາທັນຊະລິຊາດົກທີ ໗ ຈົບ**

# ໘. ກິງສຸໂກປະມະຊາດົກ (໔໘໘)
## ວ່າດ້ວຍຄົນບໍ່ຮູ້ທຳດ້ວຍຍານຍ່ອມສົງໄສໃນທຳ

(ພຣະເຈົ້າພົມມະທັດຕັດກັບພຣະຣາດຊະໂອຣົດທັງ ໔ ພຣະອົງວ່າ)

[໑໙໖] ເຈົ້າທັງໝົດໄດ້ເຫັນຕົ້ນທອງກວາວມາແລ້ວ
ຍ້ອນເຫດໃດຈຶ່ງສົງໄສໃນຕົ້ນທອງກວາວນັ້ນນໍ
ເພາະພວກເຈົ້າບໍ່ໄດ້ສອບຖາມນາຍສາຣະຖີ
ໃຫ້ຮອບຄອບທຸກສະຖານະແມ່ນບໍ່

(ພຣະສາດສະດາຊົງສະແດງເຫດນີ້ກັບພິກຂຸທັງຫຼາຍແລ້ວ ຈຶ່ງຕັດວ່າ)

[໑໙໗] ບຸກຄົນເຫຼົ່າໃດຍັງບໍ່ຮູ້ທຳທັງຫຼາຍດ້ວຍຍານທັງປວງ
ບຸກຄົນເຫຼົ່ານັ້ນຍັງສົງໄສໃນທຳທັງຫຼາຍ
ເໝືອນພຣະຣາດຊະພາດາ ໔ ພຣະອົງສົງໄສໃນຕົ້ນທອງກວາວ

**ກິງສຸໂກປະມະຊາດົກທີ ໘ ຈົບ**

## ໙. ສາລະກະຊາດົກ (໔໔໙)
## ວ່າດ້ວຍສາລະກະວານອນ

(ໜຸ່ງຄິດຈະຈັບລີງ ຈຶ່ງກ່ຽວກ່ອມລີງວ່າ)

[໑໙໗] ພໍ່ສາລະກະວານອນ ເຈົ້າເປັນລູກຄົນດຽວຂອງພໍ່
ແລະເຈົ້າຈັກໄດ້ເປັນໃຫຍ່ໃນໂພຄະໃນຕະກູນຂອງພໍ່
ລົງມາຈາກຕົ້ນໄມ້ເທີ້ນ ມາເທີ້ນລູກພໍ່
ເຮົາຈະພາກັນກັບບ້ານດ່ຽວນີ້

(ລີງໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໙໙] ທ່ານເຂົ້າໃຈວ່າເຮົາເປັນສັດໃຈດີບໍ່ແມ່ນບໍ
ເຫດໃດຈຶ່ງຄຽນຕີເຮົາດ້ວຍໄມ້ໄຜ່
ເຮົາພໍໃຈຢູ່ໃນປ່າໝາກມ່ວງທີ່ມີໝາກສຸກ
ທ່ານຈົ່ງກັບໄປບ້ານຕາມສະບາຍເທີ້ນ

**ສາລະກະຊາດົກທີ ໙ ຈົບ**

## ໑໐. ກະປິຊາດົກ (໔໕໐)
## ວ່າດ້ວຍການເຂົ້າໃຈຜິດວ່າລີງເປັນລືສີ

(ດາບົດກຸມານເຫັນລີງປອມມີຄວາມສົງສານຈຶ່ງກ່າວກັບດາບົດໂພທິສັດຜູ້ເປັນບິດາວ່າ)

[໔໐໐] ລືສີຜູ້ນີ້ຍິນດີໃນຄວາມສະງົບແລະຄວາມສັງລວມ
ທ່ານຖືກໄພຄືຄວາມໜາວບຽດບຽນຍືນຢູ່
ເຊີນທ່ານລືສີເຂົ້າມາຍັງບັນນະສາລານີ້
ເພື່ອບັນເທົາຄວາມໜາວ ຄວາມກະວົນກະວາຍທັງໝົດເທີ້ນ

(ພຣະໂພທິສັດຟັງຄຳຂອງບຸດແລ້ວຈຶ່ງລຸກຂຶ້ນແນມເບິ່ງກໍຮູ້ວ່າເປັນລີງ ຈຶ່ງກ່າວວ່າ)

[໔໐໑] ຜູ້ນີ້ບໍ່ແມ່ນລືສີຜູ້ຍິນດີໃນຄວາມສະງົບແລະຄວາມສັງລວມດອກ
ແຕ່ເປັນລີງທີ່ຫ້ອຍໂຫນໄປຕາມງ່າໝາກເດື່ອ
ມັກປະທຸດສະຮ້າຍ ມັກໂກດ ແລະມີສັນດານຊົ່ວຊາມ
ຖ້າມັນເຂົ້າມາ ມັນກໍຈະເພິ່ງທຳລາຍບັນນະສາລານີ້

**ກະປິຊາດົກທີ ໑໐ ຈົບ**

**ສິງຄາລະວັກທີ ໑໐ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ສັບພະທາຖິຊາດົກ
໒. ຄຸຕະຕິລະຊາດົກ
໓. ມູລະປະຣິຍາຍະຊາດົກ
໔. ປາທັນຊະລີຊາດົກ
໕. ສາລະກະຊາດົກ
໖. ສຸນະຂະຊາດົກ
໗. ວິຄະຕິດສະຊາດົກ
໘. ພາໂລວາທະຊາດົກ
໙. ກິງສຸໂກປະມະຊາດົກ
໑໐. ກີປິຊາດົກ

## ລວມວັກທີ່ມີໃນນິບາດນີ້ ຄື

໑. ທັນລະຫະວັກ
໒. ກັນລະຍານະວັກ
໓. ຣຸຫະກະວັກ
໔. ພີຣະນະຖຳພະກະວັກ
໕. ອຸປາຫະນະວັກ
໖. ສັນຖະວະວັກ
໗. ອະສະທິສະວັກ
໘. ນະຕັງທັນລະຫະວັກ
໙. ກາສາວະວັກ
໑໐. ສິງຄາລະວັກ

**ທຸກະນິບາດ ຈົບ**

# ៣. ຕິກະນິບາດ

# ໑. ສັງກັບປະວັກ

## ໝວດວ່າດ້ວຍຄວາມດຳຣິ

໑. ສັງກັບປະຣາຄະຊາດົກ (໔໕໑)

### ວ່າດ້ວຍຣາຄະເກີດຍ້ອນຄວາມດຳຣິ

(ພຣະໂພທິສັດເກີດໃນຕະກູນພາມມະຫາສານຖືກລູກສອນຄືກິເລດແທງ ຈຶ່ງຂາບທູນ ພຣະຣາຊາວ່າ)

[໑] ອາດຕະມາຖືກລູກສອນຄືກິເລດອາບຢາພິດຄືຣາຄະ
ເຊິ່ງເກີດຈາກຄວາມດຳຣິເຖິງກາມ ຝົນດ້ວຍຫີນຄືວິຕົກ
ອັນນາຍຊ່າງສອນຍັງບໍ່ໄດ້ຂັດຖູໃຫ້ກ້ຽງເກົາ

[໒] ຍັງບໍ່ໄດ້ດຶງສາຍທະນູໃຫ້ພົ້ນໝວກຫູຂ້າງຂວາຂອງຄັນທະນູ
ຍັງບໍ່ທັນໄດ້ຕິດຂົນປີກນົກຍູງເປັນຕົ້ນ
ແທງເຂົ້າທີ່ຫົວໃຈທຳຄວາມຮ້ອນຮົນໄປທົ່ວສັນພາງກາຍ

[៣] ອາດຕະມາບໍ່ໄດ້ເຫັນບາດແຜທີ່ຖືກແທງ
ແລະເລືອດທີ່ໄຫຼອອກຈາກບາດແຜເລີຍ
ຕະຫຼອດເວລາທີ່ບໍ່ໄດ້ອົບຮົມຈິດດ້ວຍອຸບາຍອັນແຍບຄາຍ
ອາດຕະມາໄດ້ນຳທຸກມາໃຫ້ແກ່ຕົນສາເອງ

**ສັງກັບປະຣາຄະຊາດົກທີ ໑ ຈົບ**

## ໒. ຕິລະມຸດຖິຊາດົກ (໔໕໒)

## ວ່າດ້ວຍການຜູກໂກດເພາະເມັດງາພຽງກຳມືດຽວ

(ພົມມະທັດຕະກຸມານຊົງຜູກໂກດອາຈານບໍ່ຫາຍ ຈຶ່ງຕັດກັບອາຈານວ່າ)

[໔] ການທີ່ທ່ານອາຈານຈັບແຂນຂ້າພະເຈົ້າແລ້ວຄ່ຽນຕີຂ້າພະເຈົ້າດ້ວຍໄມ້ແສ້
ເພາະງາກຳມືດຽວນັ້ນຍັງຝັງໃຈຂ້າພະເຈົ້າຢູ່ຈົນທຸກວັນນີ້

[໕] ທ່ານພານ ທ່ານບໍ່ຮັກຊີວິດຂອງຕົວເອງແລ້ວບໍ
ຈຶ່ງກ້າເຂົ້າມາໃນບ່ອນນີ້ ທ່ານລືມໄປແລ້ວບໍວ່າ
ເຄີຍຈັບແຂນຂ້າພະເຈົ້າຄ່ຽນຕີເຖິງ ໓ ຄັ້ງ

(ອາຈານໄດ້ຟັງດັ່ງນັ້ນ ຈຶ່ງກ່າວຂາບທູນວ່າ)

[໖] ອາຣະຍະຊົນບາງຄົນຍ່ອມກິດກັນຄົນທຳຄວາມຊົ່ວດ້ວຍອາດຍາ
ການທຳນັ້ນເປັນການສອນບໍ່ແມ່ນເປັນເວນແຕ່ຢ່າງໃດ
ບັນດິດທັງຫຼາຍຮູ້ເຫດນັ້ນແນວນີ້

**ຕິລະມຸດຖິຊາດົກທີ ໘ ຈົບ**

## ໓. ມະນິກັນຖະຊາດົກ (໘໕໓)
## ວ່າດ້ວຍການຂໍແກ້ວມະນີ

(ພະຍານາກເມື່ອຈະຫ້າມດາບົດບໍ່ໃຫ້ຂໍ ຈຶ່ງໄດ້ກ່າວວ່າ)

[໗] ເພາະແກ້ວມະນີດວງນີ້ເປັນເຫດເຮັດໃຫ້ເຂົ້ານ້ຳເກີດຂຶ້ນ
ແກ່ຂ້າພະເຈົ້າຫຼວງຫຼາຍ
ຂ້າພະເຈົ້າໃຫ້ແກ້ວມະນີທ່ານບໍ່ໄດ້ ທ່ານເປັນຄົນຂໍຫຼາຍໂພດ
ຂ້າພະເຈົ້າຈະບໍ່ມາອາສົມຂອງທ່ານອີກແລ້ວ

[໘] ເມື່ອທ່ານຂໍແກ້ວມະນີຈົນເຮັດໃຫ້ຂ້າພະເຈົ້າຢ້ານກົວ
ເໝືອນຊາຍໜຸ່ມຖືດາບທີ່ຄົມຝົນດ້ວຍຫີນເຮັດໃຫ້ຜູ້ອື່ນສະດຸ້ງຢ້ານໄດ້
ຂ້າພະເຈົ້າໃຫ້ແກ້ວມະນີທ່ານບໍ່ໄດ້ ທ່ານເປັນຄົນຂໍຫຼາຍໂພດ
ຂ້າພະເຈົ້າຈະບໍ່ມາອາສົມຂອງທ່ານອີກແລ້ວ

(ດາບົດໂພທິສັດຜູ້ອ້າຍໄດ້ກ່າວກັບດາບົດຜູ້ນ້ອງວ່າ)

[໙] ບຸກຄົນບໍ່ຄວນຂໍສິ່ງທີ່ຮູ້ວ່າເປັນທີ່ຮັກຂອງເຂົາ
ອັນໜຶ່ງ ເພາະຂໍຫຼາຍໂພດຍ່ອມເປັນທີ່ກຽດຊັງ
ນາຄະຣາດຖືກລືສີຂໍແກ້ວມະນີ
ຈຶ່ງບໍ່ຫວນກັບມາໃຫ້ລືສີເຫັນອີກເລີຍ

**ມະນິກັນຖະຊາດົກທີ ໓ ຈົບ**

# ໔. ກຸນທະກະກຸດສີສິນທະວະຊາດົກ (໔໕໔)
## ວ່າດ້ວຍມ້າສິນທົບກິນຮຳເຂົ້າ

(ພຣະໂພທິສັດເກີດໃນຕະກູນພໍ່ຄ້າເມື່ອຈະທົດລອງລູກມ້າສິນທົບ ຈຶ່ງກ່າວວ່າ)

[໑໐] ຫຍ້າອັນເປັນເງື່ອນ ເຂົ້າກົ້ນໝໍ້
ແລະຮຳເຂົ້າເຈົ້າເຄີຍກິນມາແລ້ວ
ນັ້ນເປັນອາຫານຂອງເຈົ້າ
ຍ້ອນເຫດໃດບັດນີ້ເຈົ້າຈຶ່ງບໍ່ກິນ

(ລູກມ້າສິນທົບໄດ້ກ່າວວ່າ)

[໑໑] ມະຫາພາມ ສະຖານທີ່ໃດປະຊາຊົນບໍ່ຮູ້ຈັກ
ສັດລ້ຽງໂດຍຊາດ ໂດຍວິໄນ
ສະຖານທີ່ນັ້ນມີເຂົ້າກົ້ນໝໍ້ແລະຮຳເຂົ້າຢູ່ເປັນຈຳນວນຫຼາຍ

[໑໒] ສ່ວນທ່ານຮູ້ຈັກຂ້າພະເຈົ້າດີວ່າ ມ້ານີ້ເປັນມ້າຊັ້ນຍອດຊະນິດໃດ
ຂ້າພະເຈົ້າຮູ້ຢູ່ ເພາະອາໄສທ່ານຜູ້ຮູ້ ຈຶ່ງບໍ່ກິນຮຳເຂົ້າຂອງທ່ານ

**ກຸນທະກະກຸດສີສິນທະວະຊາດົກທີ ໔ ຈົບ**

# ໕. ສຸກະຊາດົກ (໔໕໕)
## ວ່າດ້ວຍລູກນົກແຂກເຕົ້າ

(ພຣະສາດສະດາເມື່ອຊົງນຳເລື້ອງໃນອະດີດມາແລ້ວ ຈຶ່ງໄດ້ຕັດວ່າ)

[໑໓] ນົກແຂກເຕົ້າຕົວນັ້ນຮູ້ປະມານໃນການກິນອາຫານພຽງໃດ
ຈະມີອາຍຸຍືນແລະລ້ຽງດູມານດາບິດາໄດ້ນານພຽງນັ້ນ

[໑໔] ແຕ່ເມື່ອກືນກິນອາຫານຫຼາຍເກີນໄປ
ມັນຈຶ່ງຈົມລົງແລ້ວໃນມະຫາສະມຸດນັ້ນ
ເພາະວ່າມັນບໍ່ຮູ້ຈັກປະມານ

[໑໕] ເພາະສະນັ້ນ ການຮູ້ຈັກປະມານ
ຄືການບໍ່ຕິດຢູ່ໃນຣົດອາຫານເປັນການດີ

ບຸກຄົນຜູ້ບໍ່ຮູ້ຈັກປະມານຈະຈົມລົງ
ຜູ້ຮູ້ຈັກປະມານຈະບໍ່ຈົມລົງ

**ສຸກະຊາດົກທີ ໕ ຈົບ**

## ໖. ຊະຣູທະປານະຊາດົກ (໘໕໖)
## ວ່າດ້ວຍຂຸດນ້ຳສ້າງເກົ່າ

(ພຣະສາດສະດາເມື່ອຊົງສະແດງພຣະທຳມະເທດສະໜາແລ້ວ ຈຶ່ງໄດ້ຕັດວ່າ)

[໑໖] ພໍ່ຄ້າທັງຫຼາຍທີ່ມີຄວາມຕ້ອງການນ້ຳ
ພາກັນຂຸດນ້ຳສ້າງເກົ່າຢູ່ ໄດ້ແຮ່ເຫຼັກ ແຮ່ທອງແດງ
ແຮ່ດີບຸກ ແຮ່ຕະກົ່ວ ແຮ່ເງິນ ແຮ່ຄຳ ແກ້ວມຸກດາ
ແກ້ວໄພທູນເປັນຈຳນວນຫຼາຍ

[໑໗] ແຕ່ພໍ່ຄ້າເຫຼົ່ານັ້ນບໍ່ຍິນດີດ້ວຍຊັບນັ້ນ
ໄດ້ພາກັນຂຸດເລິກຍິ່ງຂຶ້ນໄປອີກ
ພະຍານາກຕົວມີພິດຮ້າຍແຮງມີເດດກ້າໃນນ້ຳສ້າງນັ້ນ
ໄດ້ຂ້າພວກເຂົາດ້ວຍເດດແຫ່ງພິດ

[໑໘] ເພາະສະນັ້ນ ບຸກຄົນເມື່ອຈະຂຸດຢ່າຂຸດເລິກເກີນໄປ
ເພາະວ່ານ້ຳສ້າງທີ່ຂຸດເລິກເກີນໄປບໍ່ເປັນການດີ
ຊັບທີ່ພວກພໍ່ຄ້າຂຸດໄດ້ມາແລະຊີວິດຂອງພວກພໍ່ຄ້າ
ຖືກພະຍານາກເຮັດໃຫ້ພິນາດໄປຍ້ອນການຂຸດເລິກເກີນໄປ

**ຊະຣູທະປານະຊາດົກທີ ໖ ຈົບ**

## ໗. ຄາມະນິຈັນທະຊາດົກ (໘໕໗)
### ວ່າດ້ວຍຄາມະນິຈັນທະພານ

(ອາຫາດມຸຂະກຸມານໂພທິສັດເຫັນກິຣິຍາຂອງພວກລີງແລ້ວ ຈຶ່ງໄດ້ກ່າວກັບອຳມາດ ຄາມະນິຈັນທະພານວ່າ)

[໑໙] ສັດນີ້ບໍ່ສະຫຼາດ (ທີ່ຈະກະຫຼືສ້າງ) ບ້ານເຮືອນ
ເປັນສັດມີປີກກະຕິຫຼຸກຫຼີກໜ້າຫ່ຽວ

ມັກທໍາລາຍສິ່ງທີ່ເຂົາເຮັດໄວ້ແລ້ວສ້າງໄວ້ແລ້ວ
ສັດຕະກູນນີ້ມີທໍາມະຊາດແນວນີ້

[໔໐] ຂົນແນວນີ້ບໍ່ແມ່ນຂົນຂອງຜູ້ມີຈິດປະກອບດ້ວຍປັນຍາ
ລີງນີ້ເປັນສັດທີ່ບໍ່ໜ້າໄວ້ວາງໃຈ
ພຣະເຈົ້າຊົນສັນທະຜູ້ເປັນພຣະຊະນົກຂອງຂ້າພະເຈົ້າ
ໄດ້ຕັດສອນໄວ້ແນວນີ້ວ່າ
ທໍາມະດາລີງບໍ່ຮູ້ເຫດທີ່ຄວນຫຼືບໍ່ຄວນອັນໃດເລີຍ

[໔໑] ສັດເຊັ່ນນັ້ນຈະລ້ຽງດູມານດາ ບິດາ ອ້າຍ ນ້ອງຊາຍ
ຫຼືເອື້ອຍ ນ້ອງສາວຂອງຕົນບໍ່ໄດ້ເລີຍ
ພຣະເຈົ້າທະສະຣົດຜູ້ເປັນພຣະຊະນົກຂອງຂ້າພະເຈົ້າໄດ້ຕັດສອນໄວ້ແນວນີ້

**ຄາມະນີຈັນທະຊາດົກທີ ໗ ຈົບ**

## ໘. ມັນທາຕຸຣາຊະຊາດົກ (໔໕໘)
## ວ່າດ້ວຍພຣະເຈົ້າມັນທາດ

(ພຣະສາດສະດາເມື່ອຊົງສະແດງພຣະທໍາມະເທດສະໜາແລ້ວ ຈຶ່ງໄດ້ຕັດວ່າ)

[໔໔] ດວງຈັນແລະດວງອາທິດໂຄຈອນຮອບພູເຂົາສິເນຣຸ
ສ່ອງແສງສະຫວ່າງສະໄຫວໄປທົ່ວທິດມີກໍານົດປະມານທໍ່ໃດ
ສັດທັງຫຼາຍທີ່ອາໄສແຜ່ນດິນຢູ່ໃນທີ່ມີກໍານົດປະມານທໍ່ນັ້ນ
ລ້ວນເປັນທາດຂອງພຣະເຈົ້າມັນທາດທັງໝົດ

[໔໓] ຂຶ້ນຊື່ວ່າຄວາມອີ່ມໃນກາມທັງຫຼາຍບໍ່ມີແມ່ນດ້ວຍຝົນກະຫາປະນະ
ກາມທັງຫຼາຍມີຄວາມຍິນດີໜ້ອຍແຕ່ມີທຸກຫຼາຍ
ບັນດິດຮູ້ແຈ້ງແລ້ວແນວນີ້

[໔໔] ສາວົກຂອງພຣະສໍາມາສໍາພຸດທະເຈົ້າ
ບໍ່ຍິນດີໃນກາມທັງຫຼາຍແມ່ນທີ່ເປັນທິບ
ແຕ່ຍິນດີໃນຄວາມສິ້ນຕັນຫາ

**ມັນທາຕຸຣາຊະຊາດົກທີ ໘ ຈົບ**

## ໗. ຕິຣິຕະວັດສະຊາດົກ (໔໕໗)

## ວ່າດ້ວຍຕິຣິຕະວັດສະດາບົດ

(ອຸປະຣາດເຂົ້າໄປເຝົ້າພຣະຣາຊາຖວາຍບັງຄົມແລ້ວ ຂາບທູນວ່າ)

[໔໕] ກໍາອັນໃດ ໆ ທີ່ສໍາເລັດດ້ວຍວິຊາຂອງດາບົດນີ້ບໍ່ມີເລີຍ
ອັນໜຶ່ງ ດາບົດນີ້ເປັນພຣະຍາດ ເປັນພຣະສະຫາຍຂອງພຣະອົງກໍບໍ່ແມ່ນ
ເມື່ອເປັນເຊັ່ນນັ້ນ ຍ້ອນເຫດໃດ
ຕິຣິຕະວັດສະດາບົດຜູ້ມີປົກກະຕິຖືໄມ້ ໓ ທ່ອນທ່ຽວໄປ
ຈຶ່ງບໍຣິໂພກໂພຊະນະມີຣົດເລີດນໍ

(ພຣະຣາຊາຊົງສັນເສີນຄຸນຂອງຕິຣິຕະວັດສະດາບົດໂພທິສັດວ່າ)

[໔໖] ເມື່ອພໍ່ພ່າຍແພ້ໃນການຣົບ
ຕົກຢູ່ໃນອັນຕະລາຍແຕ່ຜູ້ດຽວ
ດາບົດນັ້ນໄດ້ທໍາການອະນຸເຄາະ ຍື່ນມືຊ່ອຍເຫຼືອ
ພໍ່ຜູ້ຕົກຍາກຢູ່ໃນປ່າໃຫຍ່ອັນທາຣຸນ
ຍ້ອນການຊ່ອຍເຫຼືອນັ້ນ
ພໍ່ຜູ້ກໍາລັງຜະເຊີນທຸກຢູ່ກໍຂຶ້ນຈາກນໍ້າສ້າງໄດ້

[໔໗] ພໍ່ຜູ້ດໍາຣົງຢູ່ໃນມະນຸດໂລກນີ້
ກໍາລັງຕົກຢູ່ໃນວິໄສຂອງພະຍາມັດຈຸຣາດ ມາເຖິງສະຖານທີ່ນີ້ໄດ້
ຍ້ອນການຊ່ອຍເຫຼືອອັນແສນຍາກຂອງດາບົດນັ້ນ
ລູກເອີຍ ຕິຣິຕະວັດສະດາບົດເປັນຜູ້ສົມຄວນແກ່ລາບ
ພວກເຈົ້າຈົ່ງຖວາຍປັດໄຈທີ່ຄວນບໍຣິໂພກ
ຈົ່ງບູຊາດ້ວຍປັດໄຈທີ່ຄວນບູຊາແກ່ທ່ານເທີ້ນ

**ຕິຣິຕະວັດສະຊາດົກທີ ໗ ຈົບ**

## ໑໐. ທູຕະຊາດົກ (໔໖໐)

## ວ່າດ້ວຍທຸກຊີວິດເປັນທູດຂອງທ້ອງ

(ບຸຣຸດໂລເລຄົນໜຶ່ງໄດ້ເຫັນວິທີສະເຫວີຍພຣະກະຍາຫານຂອງພຣະເຈົ້າໂພຊະນະສຸດ ທີກະໂພທິ
ສັດ ຕົກຢູ່ໃນອໍານາດຂອງຄວາມຢາກ ຈຶ່ງກ່າວ ໔ ຄາຖາທູນວ່າ)

[໔໗] ສັດທັງຫຼາຍທີ່ຕົກຢູ່ໃນອຳນາດຂອງຕັນຫາໄປສູ່ສະຖານທີ່ໄກ
ເພື່ອຈະຂໍແມ່ນກັບຄືນທີ່ເປັນສັດຕູເພື່ອປະໂຫຍດແກ່ທ້ອງໃດ
ຂ້າພຣະອົງເປັນທູດຂອງທ້ອງນັ້ນ ຂ້າແດ່ ພຣະອົງຜູ້ເປັນຈອມທັບ
ຂໍພຣະອົງຢ່າຊົງພິໂຣດຂ້າພຣະອົງເລີຍ

[໔໘] ມະນຸດທັງຫຼາຍຕົກຢູ່ໃນອຳນາດຂອງທ້ອງໃດທັງກາງເວັນກາງຄືນ
ຂ້າພຣະອົງເປັນທູດຂອງທ້ອງນັ້ນ ຂ້າແດ່ ພຣະອົງຜູ້ເປັນຈອມທັບລົດ
ຂໍພຣະອົງຢ່າຊົງພິໂຣດຂ້າພຣະອົງເລີຍ

(ພຣະຣາຊາໄດ້ສະດັບຄຳຂອງບຸຣຸດນັ້ນແລ້ວ ຈຶ່ງຕັດວ່າ)

[໕໐] ພໍ່ພາມ ເຮົາຈະໃຫ້ງົວແດງ ໑,໐໐໐ ຕົວ
ພ້ອມກັບງົວຈ່າຝູງແກ່ທ່ານ ເພາະທູດຈະບໍ່ໃຫ້ແກ່ທູດໄດ້ແນວໃດ
ແມ່ນເຮົາກໍເປັນທູດຂອງທ້ອງນັ້ນຄືກັນ

**ທູຕະຊາດົກທີ ໑໐ ຈົບ**

**ສັງກັບປະວັກທີ ໑ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

# ໔. ປະທຸມະວັກ

## ໝວດວ່າດ້ວຍດອກບົວ

## ໑. ປະທຸມະຊາດົກ (໔໖໑)

## ວ່າດ້ວຍລູກຊາຍເສດຖີຂໍດອກບົວ

(ລູກຊາຍເສດຖີຄົນໜຶ່ງຮຽກຊາຍດັງແຫວ່ງມາແລ້ວ ກ່າວຂໍດອກບົວວ່າ)

[໕໑] ຜົມແລະໜວດທີ່ຂາດໄປແລ້ວ ໆ ຍັງປົ່ງຂຶ້ນອີກສັນໃດ
ຂໍດັງຂອງທ່ານຈົ່ງປົ່ງຂຶ້ນສັນນັ້ນ
ເຮົາຂໍດອກບົວທ່ານແລ້ວ ຂໍທ່ານຈົ່ງໃຫ້ແກ່ເຮົາ

(ລູກຊາຍເສດຖີຄົນທີ ໔ ກ່າວຂໍວ່າ)

[໕໔] ພືດທີ່ເກັບໄວ້ໃນລະດູໃບໄມ້ຫຼົ່ນ
ເຂົາຫວ່ານລົງໃນນາແລ້ວງອກຂຶ້ນສັນໃດ
ຂໍດັງຂອງທ່ານຈົ່ງງອກຂຶ້ນສັນນັ້ນ
ເຮົາຂໍດອກບົວທ່ານແລ້ວ ຂໍທ່ານຈົ່ງໃຫ້ແກ່ເຮົາ

(ພຣະໂພທິສັດລູກຊາຍເສດຖີຄົນທີ ໕ ກ່າວຂໍວ່າ)

[໕໕] ຄົນທັງ ໔ ຄົນນີ້ເພີ້ເຈີ້ຢູ່ດ້ວຍຄິດວ່າ
ຜູ້ນີ້ຈະໃຫ້ດອກບົວແກ່ເຮົາ ພວກເຂົາຈະເວົ້າຫຼືບໍ່ເວົ້າກໍຕາມ
ດັງຂອງທ່ານບໍ່ມີທາງຈະປົ່ງຂຶ້ນໄດ້
ເຮົາພຽງແຕ່ຂໍທ່ານທີ່ນັ້ນ ທ່ານຈົ່ງໃຫ້ດອກບົວແກ່ເຮົາເນາະສະຫາຍ

**ປະທຸມະຊາດົກທີ ໑ ຈົບ**

## ໔. ມຸທຸປານິຊາດົກ (໔໖໔)

## ວ່າດ້ວຍພຣະຣາຊາຖືກຫຼອກດ້ວຍຂົນຝ່າມືອັນອ່ອນນຸ້ມ

(ພຣະຣາດຊະທິດາໃຫ້ແມ່ນົມຮຽນຄາຖາໄປທູນພຣະຣາດຊະກຸມານວ່າ)

[໕໔] ເມື່ອໃດ ມີຄົນໃຊ້ທີ່ມີຝ່າມືອ່ອນນຸ້ມ

ຊ້າງທີ່ເຝິກໄວ້ດີແລ້ວ ເວລາມືດ ແລະຝົນຕົກ
ເມື່ອນັ້ນ ພຣະອົງເພິ່ງສົມປະສົງແນ່ນອນ

(ພຣະຣາຊາໂພທິສັດບໍ່ອາດຈະຮັກສາພຣະຣາດຊະທິດາໄວ້ໄດ້ ຈຶ່ງໄດ້ຕັດວ່າ)

[໓໕] ຍິງເຫຼົ່ານັ້ນເວົ້າຈາອ່ອນຫວານ ບໍ່ຮູ້ຈັກພໍ
ໃຫ້ເຕັມໄດ້ຍາກເໝືອນກັບແມ່ນ້ຳ
ຍ່ອມຈົມລົງ (ໃນນະຮົກ)
ບຸກຄົນຮູ້ແຈ້ງເນື້ອຄວາມຂໍ້ນັ້ນແລ້ວ ເພິ່ງເວັ້ນໃຫ້ຫ່າງໄກ

[໓໖] ຍິງເຫຼົ່ານັ້ນຄົບຫາຊາຍໃດ
ດ້ວຍຄວາມພໍໃຈຫຼືດ້ວຍຊັບກໍຕາມ
ຍ່ອມຕາມເຜົາຜານຊາຍນັ້ນທຸກເວລາ
ເໝືອນໄຟປ່າເຜົາຜານພື້ນທີ່ຂອງຕົນ

**ມຸທຸປານິຊາດົກທີ ໘ ຈົບ**

## ໓. ຈູລະປະໂລພະນະຊາດົກ (໘໖໓)
## ວ່າດ້ວຍການປະເລົ້າປະໂລມຂອງຍິງພຽງປຶດດຽວ

(ອະນິດຖິກຸມານໂພທິສັດດຳຣິຈະຊ່ອຍເຫຼືອດາບົດຜູ້ເສື່ອມຈາກຊານ ຈຶ່ງໄດ້ຕັດວ່າ)

[໓໗] ຕົວທ່ານເອງຍ່າງມາໄດ້ເທິງພື້ນນ້ຳທີ່ບໍ່ແຕກແຍກອອກດ້ວຍລິດ
ເມື່ອເຖິງຄວາມຄຸກຄີກັບຍິງ ຈຶ່ງຈົມລົງໃນຫ້ວງນ້ຳໃຫຍ່

[໓໘] ທຳມະດາຍິງທັງຫຼາຍມີຄວາມໝຸນວຽນປ່ຽນຢູ່ສະເໝີ
ມີມາຍາຫຼາຍ ເຮັດພົມມະຈັນໃຫ້ກຳເຣີບ
ຍ່ອມຈົມລົງ (ໃນນະຮົກ)
ບຸກຄົນຮູ້ແຈ້ງເນື້ອຄວາມຂໍ້ນັ້ນແລ້ວ ເພິ່ງເວັ້ນໃຫ້ຫ່າງໄກ

[໓໙] ຍິງເຫຼົ່ານັ້ນຄົບຫາຊາຍໃດ
ດ້ວຍຄວາມພໍໃຈຫຼືດ້ວຍຊັບກໍຕາມ
ຍ່ອມຕາມເຜົາຜານຊາຍນັ້ນທຸກເມື່ອ
ເໝືອນໄຟປ່າເຜົາຜານພື້ນທີ່ຂອງຕົນ

**ຈູລະປະໂລພະນະຊາດົກທີ ໓ ຈົບ**

## ໔. ມະຫາປະນາທະຊາດົກ (໔໙໑)
## ວ່າດ້ວຍຜາສາດຂອງພຣະເຈົ້າມະຫາປະນາທະ

(ພຣະສາດສະດາຊົງສະແດງພຣະທຳມະເທດສະໜາ ຈຶ່ງໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ)

[໔໐] ພຣະຣາຊາຊົງພະນາມວ່າປະນາທະ ຊົງມີຜາສາດຄຳ
ກວ້າງ ໑໖ ຊົ່ວລູກທະນູຕົກ ສູງ ໑,໐໐໐ ຊົ່ວລູກທະນູ

[໔໑] ຜາສາດສູງ ໑,໐໐໐ ຊົ່ວລູກທະນູ ມີພື້ນ ໑໐໐ ຊັ້ນ
ປະດັບປະດາດ້ວຍທຸງແກ້ວມະນີສີຂຽວ ມີນັກຟ້ອນຢູ່ ໖,໐໐໐ ຄົນ
ໂດຍແບ່ງອອກເປັນ ໗ ພວກ ຟ້ອນລຳຢູ່ໃນຜາສາດນັ້ນ

[໔໒] ພັດທະຊິ ທ່ານເວົ້າເຖິງຜາສາດຕາມທີ່ມີແລ້ວໃນການນັ້ນ
ໃນການນັ້ນຕະຖາຄົດເປັນທ້າວສັກກະເທວະຣາດ
ເປັນຜູ້ຂວນຂວາຍຊ່ອຍເຫຼືອວຽກງານຂອງທ່ານ

**ມະຫາປະນາທະຊາດົກທີ ໔ ຈົບ**

## ໕. ຂຸຣັບປະຊາດົກ (໔໙໒)
## ວ່າດ້ວຍຄົນກ້າບໍ່ຢ້ານລູກສອນທີ່ຄົມ

(ບຸດພໍ່ຄ້າຖາມພຣະໂພທິສັດຜູ້ເປັນຫົວໜ້າເຮັດໜ້າທີ່ອາຣັກຂາວ່າ)

[໔໓] ເມື່ອມໍຣະນະໄພຜາກົດສະເພາະໜ້າ
ເພາະເຫັນພວກໂຈນຍິງລູກທະນູອັນແຫຼມຄົມດ້ວຍຄວາມວ່ອງໄວ
ແລະຖືດາບທີ່ທານ້ຳມັນອັນຄົມ
ຍ້ອນເຫດໃດນໍ ທ່ານຈຶ່ງບໍ່ສະດຸ້ງຢ້ານ

(ພຣະໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງກ່າວ ໒ ຄາຖາວ່າ)

[໔໔] ເມື່ອມໍຣະນະໄພຜາກົດສະເພາະໜ້າ
ເພາະເຫັນພວກໂຈນຍິງລູກທະນູແຫຼມຄົມດ້ວຍຄວາມວ່ອງໄວ
ແລະຖືດາບທີ່ທານ້ຳມັນອັນຄົມ
ຂ້າພະເຈົ້າກັບຍິນດີແລະພໍໃຈຫຼາຍທີ່ສຸດ

[໘໕] ຂ້າພະເຈົ້ານັ້ນມີຄວາມຍິນດີຈຶ່ງກຳຈັດສັດຕູໄດ້
ຂ້າພະເຈົ້າໄດ້ສະລະຊີວິດໄວ້ກ່ອນແລ້ວ ເພາະເມື່ອຍັງອາໄລໃນຊີວິດ
ບຸກຄົນກ້າຫານຈະທຳກິດຂອງຜູ້ກ້າຫານໃນການໃດ ໆ ບໍ່ໄດ້ເລີຍ

**ຊຸຣັບປະຊາດົກທີ ໕ ຈົບ**

## ໖. ວາຕັກຄະສິນທະວະຊາດົກ (໘໖໖)
## ວ່າດ້ວຍມ້າສິນທົບຊື່ວາຕັກຄະ

(ລູກລາໄດ້ເຂົ້າໄປຫາແມ່ລາແລ້ວຖາມວ່າ)

[໘໖] ແມ່ເປັນໂຣກຈ່ອຍເຫຼືອງບໍ່ຢາກອາຫານຍ້ອນມ້າໂຕໃດ
ມ້ານັ້ນຄືໂຕນີ້ມາພັກດີແລ້ວ
ບັດນີ້ ຍ້ອນເຫດໃດ ແມ່ຈຶ່ງໃຫ້ມ້ານັ້ນໜີໄປສານໍ

(ແມ່ລາໄດ້ຟັງຄຳຂອງລູກ ຈຶ່ງກ່າວວ່າ)

[໘໗] ກໍຖ້າຄວາມເຊີຍຊິດເກີດມີມາແຕ່ທຳອິດພົບ
ຊື່ສຽງຂອງສະຕີຈະເສຍຫາຍ
ຍ້ອນເຫດນັ້ນ ລູກເອີຍ ແມ່ຈຶ່ງເຮັດໃຫ້ມ້ານັ້ນໜີໄປ

(ພຣະສາດສະດາໄດ້ຕັດພຣະຄາຖາວ່າ)

[໘໘] ຍິງໃດບໍ່ປາຖະໜາຊາຍມີຍົດສັກ
ເກີດໃນຕະກູນສູງທີ່ເຂົາຊັກນຳມາແລ້ວ ຈະເສຍໃຈໄປນານແສນນານ
ເໝືອນພັດທະລີແມ່ລາເສຍໃຈເພາະຄິດເຖິງມ້າສິນທົບທີ່ຊື່ວາຕັກຄະ

**ວາຕັກຄະສິນທະວະຊາດົກທີ ໖ ຈົບ**

## ໗. ສຸວັນນະກັກກະຕະກະຊາດົກ (໘໖໗)
## ວ່າດ້ວຍນາງຊ້າງພັງອ້ອນວອນປູຄຳ

(ຊ້າງໂພທິສັດໃຫ້ຊ້າງພັງຮູ້ວ່າຕົນຖືກປູໜີບເພື່ອຈະບໍ່ໃຫ້ນາງໜີໄປ ຈຶ່ງກ່າວວ່າ)

[໘໙] ເຮົາຖືກປູຄຳເຊິ່ງມີຕາດຸນອອກມາ
ມີກະດູກເປັນໜັງອາໄສຢູ່ໃນນ້ຳ ບໍ່ມີຂົນ ໜີບແລ້ວ

ຮ້ອງຂໍຄວາມກະລຸນາຢູ່
ເຈົ້າຢ່າຖິ້ມເຮົາຜູ້ເປັນສາມີຄູ່ຊີວິດໄປເລີຍ

(ຊ້າງພັງຫັນກັບໄປປອບໂຍນພຣະໂພທິສັດວ່າ)

[໕໐] ຂ້າແດ່ລູກເຈົ້າ ຂ້ານ້ອຍຈະບໍ່ຖິ້ມທ່ານ
ຜູ້ເປັນຊ້າງມີອາຍຸ ໖໐ ປີ ເສື່ອມກຳລັງ
ທ່ານເປັນສາມີສຸດທີ່ຮັກຂອງຂ້ານ້ອຍ
ຍິ່ງກວ່າແຜ່ນດິນອັນມີມະຫາສະມຸດທັງ ໔ ເປັນຂອບເຂດ

(ຊ້າງພັງອ້ອນວອນປູຄຳວ່າ)

[໕໑] ທ່ານເປັນສັດນ້ຳທີ່ປະເສີດກວ່າປູທັງຫຼາຍໃນມະຫາສະມຸດ
ໃນແມ່ນ້ຳຄົງຄາ ແລະໃນແມ່ນ້ຳຍະມຸນາ
ຂໍທ່ານຈົ່ງປ່ອຍສາມີຂອງຂ້າພະເຈົ້າຜູ້ຮ້ອງໄຫ້ຢູ່ເທີ້ນ

**ສຸວັນນະກັກກະຕະກະຊາດົກທີ ໗ ຈົບ**

## ໘. ອາຣາມະທູສະກະຊາດົກ (໔໖໘)
## ວ່າດ້ວຍລີງທຳລາຍສວນ

(ພຣະໂພທິສັດເຫັນກິຣິຍາຂອງລີງ ຈຶ່ງກ່າວວ່າ)

[໕໘] ລີງຕົວທີ່ໄດ້ຮັບສົມມຸດວ່າປະເສີດທີ່ສຸດ
ກວ່າລີງທັງປວງທີ່ມີຊາດສະເໝີກັນ
ຍັງມີປັນຍາຂະໜາດນີ້
ສ່ວນລີງນອກຈາກນີ້ຈະມີປັນຍາຫຼາຍປານໃດ

(ພວກລີງໄດ້ຟັງຄຳຂອງພຣະໂພທິສັດແລ້ວ ຈຶ່ງກ່າວວ່າ)

[໕໙] ທ່ານຜູ້ປະເສີດ ທ່ານຍັງບໍ່ຮູ້ຈຶ່ງໄດ້ຕິຕຽນແນວນີ້
ພວກເຮົາບໍ່ເຫັນຮາກແລ້ວຈະຮູ້ໄດ້ແນວໃດວ່າ
ຕົ້ນໄມ້ຢັ່ງຮາກລົງເລິກສ່ຳໃດ

(ພຣະໂພທິສັດກ່າວວ່າ)

[๕๘] ເຮົາບໍ່ຕິຕຽນພວກເຈົ້າທີ່ເປັນລີງປ່າດອກ
ແຕ່ຜູ້ທີ່ຄວນຖືກຕຳໜິຄືພຣະເຈົ້າວິດສະເສນະ
ທີ່ພວກເຈົ້າປູກຕົ້ນໄມ້ໃຫ້

**ອາຣາມະທູສະກະຊາດົກທີ ๘ ຈົບ**

## ๙. ສຸຊາຕາຊາດົກ (๘๖๙)
## ວ່າດ້ວຍຊົງຜາຣົບນາງສຸຊາດາ

(ພຣະໂພທິສັດເປັນໂອຣົດຂອງພຣະເຈົ້າພົມມະທັດໄດ້ຕັດກັບພຣະມານດາວ່າ)

[๕๙] ທຳມະດາສັດທັງຫຼາຍທີ່ສົມບູນດ້ວຍວັນນະ
ມີສຽງອັນມ່ວນ ໜ້າຮັກໜ້າຊົມ ແຕ່ເວົ້າຈາຫຍາບກະດ້າງ
ຍ່ອມບໍ່ເປັນທີ່ຮັກຂອງໃຜ ໆ ທັງໃນໂລກນີ້ແລະໂລກໜ້າ

[๖๐] ພຣະອົງຊົງທອດພຣະເນດແລ້ວບໍ່ແມ່ນບໍ
ນົກກາເວົ້າສີດຳຕົວນີ້ມີສີບໍ່ງາມ ລາຍຕົກທົ່ວຕົວ
ແຕ່ເປັນທີ່ຮັກຂອງສັດທັງຫຼາຍຈຳນວນຫຼາຍ
ຍ້ອນຮ້ອງດ້ວຍສຽງອັນມ່ວນ

[๖๑] ເພາະສະນັ້ນບຸກຄົນຄວນເວົ້າຄຳອັນສະຫຼະສະຫຼວຍ
ຄິດກ່ອນເວົ້າ ເວົ້າພໍປະມານບໍ່ຟຸ້ງຊ່ານ
ຄຳເວົ້າຂອງຜູ້ທີ່ສະແດງເປັນອັດຖະເປັນທຳ
ເປັນຄຳເວົ້າອັນມ່ວນ ເປັນຄຳເວົ້າທີ່ເປັນພາສິດ

**ສຸຊາຕາຊາດົກທີ ๙ ຈົບ**

## ๑๐. ອຸລູກະຊາດົກ (๘๗๐)
## ວ່າດ້ວຍນົກເຄົ້າ

(ກາຕົວໜຶ່ງບໍ່ພໍໃຈການຕັ້ງນົກເຄົ້າໃຫ້ເປັນຣາຊາ ຈຶ່ງກ່າວກັບນົກທັງຫຼາຍວ່າ)

[๖๒] ໄດ້ຂ່າວວ່າ ພວກຍາດທັງໝົດຈະແຕ່ງຕັ້ງນົກເຄົ້າໃຫ້ເປັນໃຫຍ່
ຖ້າພວກຍາດອະນຸຍາດ ຂ້າພະເຈົ້າຈະຂໍເວົ້າຈັກຄຳໜຶ່ງ

(ນົກທັງຫຼາຍອະນຸຍາດວ່າ)

[໕໙] ເອົາເທີ້ນເພື່ອນ ພວກເຮົາທັງໝົດອະນຸຍາດ
ແຕ່ເຈົ້າຈົ່ງເວົ້າແຕ່ຄຳເວົ້າທີ່ເປັນອັດຖະເປັນທຳທ່ນັ້ນ
ເພາະວ່າພວກນົກໜຸ່ມ ໆ ທີ່ມີປັນຍາ
ແລະຊົງໄວ້ເຊິ່ງຍານອັນຮຸ່ງເຮືອງຍັງມີຢູ່

(ກາໄດ້ຮັບອະນຸຍາດແລ້ວ ຈຶ່ງກ່າວວ່າ)

[໖໐] ຂໍຄວາມຈະເລີນຮຸ່ງເຮືອງຈົ່ງມີແກ່ທ່ານທັງຫຼາຍ
ການທີ່ແຕ່ງຕັ້ງນົກເຄົ້າໃຫ້ເປັນໃຫຍ່ນັ້ນ ຂ້າພະເຈົ້າຍັງບໍ່ພໍໃຈ
ທ່ານຈົ່ງແນມເບິ່ງໜ້ານົກເຄົ້າເວລາທີ່ຍັງບໍ່ຮ້າຍເບິ່ງ
ຖ້ານົກເຄົ້າຮ້າຍຂຶ້ນມາຈະເປັນໜ້າແນວໃດ

**ອຸລູກະຊາດົກທີ ໑໐ ຈົບ**

**ປະທຸມະວັກທີ ໘ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ປະທຸມະຊາດົກ
໒. ຈູລະປະໂລພະນະຊາດົກ
໓. ຊຸຣັບປະຊາດົກ
໔. ສຸວັນນະກັກກະຕະກະຊາດົກ
໕. ສຸຊາຕາຊາດົກ
໖. ມຸທຸປານີຊາດົກ
໗. ມະຫາປະນາທະຊາດົກ
໘. ວາຕັກຄະສິນທະວະຊາດົກ
໙. ອາຣາມະທູສະກະຊາດົກ
໑໐. ອຸລູກະຊາດົກ

# ໒. ອຸທະປານະວັກ

## ໝວດວ່າດ້ວຍນ້ຳສ້າງ

## ໑. ອຸທະປານະທູສະກະຊາດົກ (໒໗໑)
## ວ່າດ້ວຍໝາຈອກທຳລາຍນ້ຳສ້າງ

(ລີສີໂພທິສັດກ່າວກັບໝາຈອກວ່າ)

[໖໑] ນີ້ເພື່ອນ ເປັນຫຍັງເຈົ້າຈຶ່ງໄດ້ຖ່າຍໃສ່ນ້ຳສ້າງດື່ມທີ່ຂຸດໄດ້ຍາກ
ຂອງພວກລີສີຊີໄພຜູ້ພຳເພັງຕະບະຢູ່ຕະຫຼອດການລະນານນໍ

(ໝາຈອກໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໖໔] ພວກເຮົາດື່ມນ້ຳບ່ອນໃດແລ້ວຍ່ອມຖ່າຍລົງບ່ອນນັ້ນ
ນັ້ນເປັນທຳຂອງພວກໝາຈອກ
ແລະເປັນທຳຂອງພວກເຮົາມາຕັ້ງແຕ່ບິດາແລະພໍ່ເຖົ້າ
ທ່ານບໍ່ຄວນຈະກ່າວໂທດທຳນັ້ນ

(ຕໍ່ແຕ່ນັ້ນພຣະໂພທິສັດຈຶ່ງກ່າວວ່າ)

[໖໓] ທຳຂອງພວກເຈົ້າຍັງເປັນແນວນີ້
ກໍສະພາບທີ່ບໍ່ແມ່ນທຳຂອງພວກເຈົ້າຈະເປັນແນວໃດ
ຂໍພວກເຮົາຢ່າໄດ້ເຫັນທຳ
ຫຼືສະພາບທີ່ບໍ່ແມ່ນທຳຂອງພວກເຈົ້າໃນການໃດ ໆ ເລີຍ

**ອຸທະປານະທູສະກະຊາດົກທີ ໑ ຈົບ**

## ໔. ພະຍັກຄະຊາດົກ (໔໗໔)

## ວ່າດ້ວຍຮຸກຂະເທວະດາອ້ອນວອນຣາດຊະສີແລະເສືອ

(ຣຸກຂະເທວະດາໂພທິສັດໄດ້ກ່າວກັບຣຸກຂະເທວະດານອກນີ້ວ່າ)

[໖໔] ຍ້ອນການຄົບຫາມິດໃດ ຄວາມປອດໄພຈະໝົດໄປ
ບັນດິດຄວນຮັກສາລາບຍົດແລະຊີວິດຂອງຕົນ
ທີ່ມິດນັ້ນເຄີຍຄອບຄອງມາກ່ອນເອົາໄວ້ຄືດັ່ງບຸກຄົນຮັກສາດວງຕາ

[໖໕] ຍ້ອນການຄົບຫາກັບມິດໃດ ຄວາມປອດໄພເພີ່ມພູນຫຼາຍຂຶ້ນ
ບັນດິດຄວນທຳການຊ່ອຍເຫຼືອໃນກິດທຸກຢ່າງຂອງມິດນັ້ນ
ໃຫ້ເໝືອນກັບເຮັດໃຫ້ກັບຕົນເອງ

(ພຣະໂພທິສັດກ່າວວ່າ)

[໖໖] ມາເທີ້ນຣາດຊະສີແລະເສືອ ພວກເຈົ້າຈົ່ງກັບໄປສູ່ປ່າໃຫຍ່
ຂໍອະມະນຸດຢ່າທຳລາຍປ່າທີ່ປາສະຈາກຣາດຊະສີແລະເສືອ

ຂໍພວກຣາດຊະສີແລະເສືອກໍຢ່າປາສະຈາກປ່າເລີຍ

**ພະຍັກຄະຊາດົກທີ ๘ ຈົບ**

# ๖. ກັດສະປະຊາດົກ (๘໗๖)
## ວ່າດ້ວຍລືສີຂໍຮ້ອງເຕົ່າ

(ພຣະໂພທິສັດບວດເປັນລືສີເມື່ອຈະຍອກຫຼິ້ນກັບລີງທຸສີນ ຈຶ່ງກ່າວວ່າ)

[໖໗] ໃຜນໍຍ່າງມາເໝືອນຄົນຖືພັດຕາຫານມາເຕັມຖາດ
ເໝືອນພາມໄດ້ລາບເຕັມມື
ເຈົ້າໄປທ່ຽວພິກຂາຈານບ່ອນໃດນໍ ເຂົ້າໄປຫາຜູ້ມີສັດທາຄົນໃດມາ

(ລີງທຸສີນໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໖໘] ຂ້າພະເຈົ້າເປັນລີງໂງ່ຈ້າຈັບຕ້ອງສິ່ງທີ່ບໍ່ຄວນຈັບຕ້ອງ
ຂໍຄວາມຈະເລີນຈົ່ງມີແກ່ທ່ານ ຂໍທ່ານຈົ່ງຊ່ອຍປ່ອຍຂ້າພະເຈົ້າ
ຂ້າພະເຈົ້າຫຼຸດພົ້ນແລ້ວຈະໄປສູ່ພູ

(ພຣະໂພທິສັດເຈຣະຈາກັບເຕົ່າວ່າ)

[໖໙] ທຳມະດາເຕົ່າເປັນຕົ້ນຕະກູນກັດສະປະໂຄດ
ລີງເປັນຕົ້ນຕະກູນໂກນທັນຍະໂຄດ
ກັດສະປະ ທ່ານຈົ່ງປ່ອຍໂກນທັນຍະສາເຫີ້ນ
ທ່ານໄດ້ເຄີຍຮ່ວມເມຖຸນກັນມາແລ້ວ

**ກັດສະປະຊາດົກທີ ๖ ຈົບ**

# ๘. ໂລນະຊາດົກ (๘໗๘)
## ວ່າດ້ວຍໂທດຂອງຄວາມໂລເລ

(ນົກກາງແກໂພທິສັດເຫັນການັ້ນທອດຖອນໃຈຢູ່ ເມື່ອຈະຍອກຫຼິ້ນ ຈຶ່ງກ່າວວ່າ)

[໗໐] ນົກຍາງແມ່ນຫຍັງ ມີຫອນ ເປັນໂຈນ ມີເມກເປັນປູ່[១]
ແມ່ນົກຍາງ ເຈົ້າຈົ່ງລົງມາຂ້າງລຸ່ມນີ້ເຫີ້ນ
ກາສະຫາຍຂອງເຮົາເປັນສັດດຸຮ້າຍ

(ກາໄດ້ຟັງດັ່ງນັ້ນ ຈຶ່ງຕອບວ່າ)

[໗໑] ເຮົາບໍ່ແມ່ນນົກຍາງມີຫອນດອກ
ເຮົາເປັນກາໂລເລ ບໍ່ເຊື່ອຟັງຄຳຂອງທ່ານ
ທ່ານຈຶ່ງມາເບິ່ງເທີ້ນ ເຮົາກາຍເປັນກາມີຂົນຫຼົ່ງນໄປແລ້ວ

(ພຣະໂພທິສັດກ່າວວ່າ)

[໗໔] ເພື່ອນເອີຍ ເຈົ້າຈັກປະສົບຄວາມຊົ່ວຮ້າຍແບບນີ້ອີກ
ຍ້ອນປົກກະຕິຂອງເຈົ້າເປັນແບບນັ້ນ
ອາຫານຂອງມະນຸດເປັນຂອງທີ່ນົກບໍ່ຄວນກິນ

**ໂລລະຊາດົກທີ ໔ ຈົບ**

## ໕. ຣຸຈິນະຊາດົກ (໔໗໕)
## ວ່າດ້ວຍເລື້ອງນົກກາທີ່ໜ້າຮັກ

(ພຣະໂພທິສັດກ່າວຄາຖາເຫຼົ່ານີ້ວ່າ)

[໗໖] ນົກຍາງຕົວນີ້ຊ່າງໜ້າຮັກແທ້ນໍ
ມາອາໄສຢູ່ໃນຮັງກາ
ນັ້ນເປັນຮັງຂອງກາດຸຮ້າຍສະຫາຍຂອງເຮົາ

(ກາກ່າວວ່າ)

[໗໔] ທ່ານຮູ້ຈັກເຮົາດີບໍ່ແມ່ນບໍ ກາງແກເພື່ອນຮັກ
ຜູ້ມີເຂົ້າຟ່າງແລະໝາກເດືອຍເປັນອາຫານ
ເຮົາບໍ່ເຊື່ອຟັງຄຳຂອງທ່ານ ທ່ານຈຶ່ງມາເບິ່ງເທີ້ນ
ເຮົາກາຍເປັນກາຂົນຫຼົ່ງນໄປແລ້ວ

(ພຣະໂພທິສັດກ່າວວ່າ)

[໗໕] ເພື່ອນເອີຍ ເຈົ້າຈັກປະສົບຄວາມຊົ່ວຮ້າຍແບບນີ້ອີກ
ຍ້ອນປົກກະຕິຂອງເຈົ້າເປັນແບບນັ້ນ
ອາຫານຂອງມະນຸດເປັນຂອງທີ່ນົກບໍ່ຄວນກິນ

**ຣຸຈິຣະຊາດົກທີ ໕ ຈົບ**

# ໖. ກຸຣຸທຳມະຊາດົກ (໒໗໖)
## ວ່າດ້ວຍທຳຂອງຊາວກຸຣຸ

(ພາມທັງຫຼາຍສັນເສີນຄຸນຂອງພຣະອຸປະຣາດໂພທິສັດວ່າ)

[໗໖] ຂ້າແດ່ ພຣະອົງຜູ້ເປັນໃຫຍ່ກວ່າເຫຼົ່າຊົນ
ຂ້າພຣະອົງທັງຫຼາຍໄດ້ຮູ້ສັດທາແລະສິນຂອງພຣະອົງແລ້ວ
ຈະຂໍຮັບພຣະຣາດຊະທານແລກປ່ຽນຄຳກັບພະຍາຊ້າງອັນຊະນະວັນ
ນຳໄປໄວ້ໃນແຄວັນກາລິງຄະ ຂ້ານ້ອຍ

(ພຣະອຸປະຣາດໂພທິສັດຕອບວ່າ)

[໗໗] ສັດທັງໝົດນັ້ນທີ່ເພິ່ງລ້ຽງດ້ວຍເຂົ້າກໍດີ
ບໍ່ເພິ່ງລ້ຽງດ້ວຍເຂົ້າກໍດີ ໃນມະນຸດໂລກນີ້ ຕົວໃດເຈາະຈົງໄປຫາ
ເຮົາບໍ່ຄວນປະຕິເສດ ນີ້ເປັນຄຳຂອງບູຣະພາຈານ

[໗໘] ພາມທັງຫຼາຍ ເຮົາຈະໃຫ້ພະຍາຊ້າງນີ້ທີ່ສົມຄວນແກ່ພຣະຣາຊາ
ເໝາະທີ່ພຣະຣາຊາຈະຊົງໃຊ້ສອຍ ມີຍົດ ປະດັບຕົກແຕ່ງຢ່າງສວຍງາມ
ປົກຄຸມກະພອງດ້ວຍຕາໜ່າງຄຳແກ່ພວກທ່ານພ້ອມທັງນາຍຄວານ
ພວກທ່ານຈົ່ງໄປຕາມປາຖະໜາເທີ້ນ

**ກຸຣຸທຳມະຊາດົກທີ ໖ ຈົບ**

# ໗. ໂຣມະຊາດົກ (໒໗໗)
## ວ່າດ້ວຍດາບົດລວງນົກກາງແກໂຣມະ

(ດາບົດໂກງຄິດຈະລວງຈັບນົກກາງແກກິນ ຈຶ່ງໄດ້ກ່າວ ໔ ຄາຖາວ່າ)

[໗໙] ໂຣມະກະ ເຮົາຢູ່ໃນຖ້ຳສີລາມາ ໕໐ ກວ່າປີ
ເມື່ອກ່ອນນົກທັງຫຼາຍບໍ່ຫວາດຣະແວງ
ໄວ້ໃຈຈຶ່ງບິນມາເກາະທີ່ມີເຮົາ

[໘໐] ວັກກັງຄະ ເວລານີ້ເປັນຫຍັງ
ນົກເຫຼົ່ານັ້ນຈຶ່ງພະຍາຍາມໜີໄປຢູ່ຮ່ອມພູແຫ່ງອື່ນ
ນົກທັງຫຼາຍບໍ່ນັບຖືເຮົາເໝືອນເມື່ອກ່ອນແລ້ວແມ່ນບໍ

ຫຼືຈາກໄປດົນນານ ຈຶ່ງຈຳເຮົາບໍ່ໄດ້
ຫຼືນົກພວກນີ້ບໍ່ແມ່ນນົກພວກນັ້ນ

(ນົກກາງແກໂພທິສັດໄດ້ຍິນດັ່ງນັ້ນ ຈຶ່ງກ່າວວ່າ)

[໗໑] ພວກເຮົາຈຳທ່ານໄດ້ດີ ບໍ່ລືມດອກ
ທ່ານກໍຄືດາບົດຕົນນັ້ນແລ້ວ ພວກເຮົາກໍບໍ່ແມ່ນນົກພວກອື່ນ
ແຕ່ຈິດຂອງທ່ານປະທຸດສະຮ້າຍໃນສັດເຫຼົ່ານີ້
ທ່ານອາຊີວະກະ ຍ້ອນເຫດນັ້ນ ພວກເຮົາຈຶ່ງຢ້ານທ່ານ

**ໂຣມະຊາດົກທີ ໗ ຈົບ**

## ໘. ມະຫິສະຊາດົກ (໔໗໘)
## ວ່າດ້ວຍລິງກັບຄວາຍ

(ຣຸກຂະເທວະດາໄດ້ກ່າວກັບຄວາຍໂພທິສັດວ່າ)

[໗໔] ເພາະມຸ້ງໝາຍປະໂຫຍດອັນໃດຕໍ່ລິງຜູ້ມີຈິດກັບກອກ
ມິປົກກະຕິປະທຸດສະຮ້າຍມິດ ທ່ານຈຶ່ງອົດກັ້ນທຸກນີ້ໄວ້
ເໝືອນຄົນອົດກັ້ນຕໍ່ເຈົ້ານາຍ
ຜູ້ໃຫ້ສິ່ງທີ່ຕ້ອງການໄດ້ທຸກຢ່າງ

[໗໕] ທ່ານຈົ່ງຂວິດມັນ ຈົ່ງຢຽບມັນ
ຖ້າບໍ່ປາມມັນໄວ້ແດ່
ພວກສັດໂງ່ກໍຈະເພີ່ງບຽດບຽນໜັກຂໍ້ຂຶ້ນ

(ຄວາຍໂພທິສັດກ່າວວ່າ)

[໗໔] ກໍເມື່ອເຈົ້າລິງຕົວນີ້ເຂົ້າໃຈວ່າຄວາຍຕົວອື່ນເໝືອນຂ້າພະເຈົ້າ
ຈັກທຳອະນາຈານແນວນີ້
ຄວາຍເຫຼົ່ານັ້ນກໍຈັກຂ້າມັນສາໃນບ່ອນນັ້ນ
ຂ້າພະເຈົ້າຈັກພົ້ນຈາກປານາຕິບາດ

**ມະຫິສະຊາດົກທີ ໘ ຈົບ**

## ໙. ສະຕະປັດຕະຊາດົກ (໘໗໙)
## ວ່າດ້ວຍມານົບເຂົ້າໃຈຜິດນົກກະໄນ

(ພຣະສາດສະດາຊົງນຳອະດີດນິທານມາສະແດງແລ້ວ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ)

[໘໕] ນາງໝາຈອກເຊິ່ງທ່ຽວໄປໃນປ່າປາຖະໜາດີ
ປະກາດໃຫ້ຮູ້ໃນຫົນທາງ
ມານົບເຂົ້າໃຈວ່າເປັນຜູ້ບໍ່ປາຖະໜາດີ
ແຕ່ເຂົ້າໃຈນົກກະໄນຜູ້ບໍ່ປາຖະໜາດີວ່າ
ເປັນຜູ້ປາຖະໜາດີ ສັນໃດ

[໘໖] ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ
ເມື່ອຜູ້ຫວັງດີກ່າວສອນ ກໍບໍ່ຮັບຄຳສອນ

[໘໗] ອັນໜຶ່ງ ຊົນເຫຼົ່າໃດສັນເສີນບຸກຄົນນັ້ນ
ຫຼືຍ້ອງຍໍບຸກຄົນນັ້ນ ຍ້ອນຄວາມຢ້ານ
ເຂົາຍ່ອມເຂົ້າໃຈບຸກຄົນນັ້ນວ່າເປັນມິດ
ເໝືອນມານົບເຂົ້າໃຈນົກກະໄນ

**ສະຕະປັດຕະຊາດົກທີ ໙ ຈົບ**

## ໑໐. ປຸຕະທູສະກະຊາດົກ (໘໘໐)
## ວ່າດ້ວຍລີງຜູ້ມັກທຳລາຍພວງດອກໄມ້

(ພານໂພທິສັດຮຽກລີງຈ່າຝູງມາວ່າກ່າວວ່າ)

[໘໘] ພະຍາເນື້ອ ທ່ານເຫັນຈະເປັນຜູ້ສະຫຼາດໃນການເຮັດຫໍ່ໃບໄມ້ແມ່ນບໍ?
ສະນັ້ນຈຶ່ງໄດ້ຮື້ມັນອອກສາ
ແລ້ວເຮັດພວງໃໝ່ໃຫ້ດີຂຶ້ນກວ່າເກົ່າ

(ລີງໄດ້ຟັງດັ່ງນັ້ນ ຈຶ່ງໄດ້ກ່າວວ່າ)

[໘໙] ມານດາບິດາຂອງຂ້າພະເຈົ້າເປັນຜູ້ສະຫຼາດໃນການເຮັດພວງໃບໄມ້ກໍບໍ່ແມ່ນ

ພວກເຮົາໄດ້ແຕ່ຮື້ສິ່ງຂອງທີ່ເຂົາເຮັດໄວ້ແລ້ວ ໆ ເທົ່ານັ້ນ
ຕະກູນຂອງພວກເຮົານີ້ມີທຳແບບນີ້

(ພາມໂພທິສັດກ່າວວ່າ)

[໗໐] ທຳຂອງພວກເຈົ້າຍັງເປັນແນວນີ້
ກໍສະພາບທີ່ບໍ່ແມ່ນທຳຂອງພວກເຈົ້າຈະເປັນແນວໃດ
ຂໍພວກເຮົາຢ່າໄດ້ເຫັນທຳ
ຫຼືສະພາບທີ່ບໍ່ແມ່ນທຳຂອງພວກເຈົ້າໃນການໃດ ໆ ເລີຍ

**ປຸຕະທູສະກະຊາດົກທີ ໑໐ ຈົບ**

**ອຸທະປານະວັກທີ ໖ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ອຸທະປານະທູສະກະຊາດົກ
໒. ພະຍັກຄະຊາດົກ
໓. ກັດສະປະຊາດົກ
໔. ໂລລະຊາດົກ
໕. ຣຸຈິຣະຊາດົກ
໖. ກຸຣຸທຳມະຊາດົກ
໗. ໂຣມະຊາດົກ
໘. ມະຫິສະຊາດົກ
໙. ສະຕະປັດຕະຊາດົກ
໑໐. ປຸຕະທູສະກະຊາດົກ

# ໔. ອັບພັນຕະຣະວັກ

## ໝວດວ່າດ້ວຍໝາກໄມ້ທິບຊື່ອັບພັນຕະຣະ

## ໑. ອັບພັນຕະຣະຊາດົກ (໔໗໑)

## ວ່າດ້ວຍໝາກໄມ້ທິບຊື່ອັບພັນຕະຣະ

(ທ້າວສັກກະຊົງເຈຣະຈາກັບພຣະມະເຫສີຂອງພຣະຣາຊາວ່າ)

[໗໑] ໝາກຂອງຕົ້ນໝາກມ່ວງທີ່ຊື່ອັບພັນຕະຣະ
ເປັນໝາກໄມ້ທິບ
ເມື່ອແມ່ຍິງແພ້ທ້ອງບໍຣິໂພກແລ້ວ
ຈະປະສູດໂອຣົດເປັນພຣະເຈົ້າຈັກກະພັດ

[໗໔] ພຣະນາງຜູ້ຈະເລີນ ແມ່ນພຣະນາງກໍຈະໄດ້ເປັນພຣະມະເຫສີ

ທັງຈະໄດ້ເປັນທີ່ໂຜດປານຂອງພຣະສະວາມີ
ພຣະຣາຊາຈັກຊົງນຳໝາກມ່ວງຊື່ອັບພັນຕະຣະນີ້
ມາພຣະຣາດຊະທານແກ່ພຣະນາງ

(ນັກແຂກເຕົ້າສຸວະໂປຕະກະໄດ້ກ່າວກັບພວກຣາກສົດວ່າ)

[໗໖] ບຸກຄົນຜູ້ກ້າຫານຍອມເສຍສະລະຊີວິດຮ່າງກາຍ
ພະຍາຍາມເຮັດປະໂຫຍດແກ່ຜູ້ທີ່ລ້ຽງຕົນມາ
ປະສົບຖານະອັນໃດ ຂ້າພະເຈົ້າກໍຈະໄດ້ປະສົບຖານະນັ້ນຄືກັນ

**ອັບພັນຕະຣະຊາດົກທີ ໑ ຈົບ**

## ໘. ເສີຍຍະຊາດົກ (໔໗໘)
## ວ່າດ້ວຍການຄົບຄົນດີຜູ້ຄົບກໍດີຂຶ້ນໄປນຳ

(ພຣະຣາຊາໂພທິສັດສົນທະນາກັບເຫຼົ່າອຳມາດວ່າ)

[໗໘] ຜູ້ໃດຄົບຫາບຸກຄົນຜູ້ປະເສີດ
ຜູ້ນັ້ນຊື່ວ່າມີສ່ວນອັນປະເສີດ ເປັນຜູ້ປະເສີດ
ເຮົາທຳໄມຕີກັບພຣະຣາຊາໂຈນອົງດຽວແລ້ວ
ໄດ້ປົດປ່ອຍພວກທ່ານໄດ້ ໑໐໐ ຄົນໃຫ້ພົ້ນຈາກການຖືກປະຫານຊີວິດ

[໗໙] ເພາະສະນັ້ນ ບຸກຄົນພຽງຜູ້ດຽວ
ທຳໄມຕີກັບຊາວໂລກທັງປວງ
ລະໂລກນີ້ໄປແລ້ວເພິ່ງໄປສູ່ສະຫວັນ
ພວກທ່ານຜູ້ເປັນຊາວກາສີຈົ່ງຟັງຄຳຂອງເຮົານີ້ເທີ້ນ

(ພຣະສາດສະດາຕັດພຣະຄາຖາວ່າ)

[໘໐] ພຣະເຈົ້າກັງສະມະຫາຣາດຜູ້ຊົງປົກຄອງເມືອງພາຣານະສີ
ເມື່ອຊົງມີພຣະດຳຣັດນີ້ແລ້ວ ຊົງວາງທະນູແລະລູກສອນ
ຊົງສັງລວມອອກບວດ

**ເສີຍຍະຊາດົກທີ ໘ ຈົບ**

# ໓. ວັດທະກີສູກະຣະຊາດົກ (໘໗໓)
## ວ່າດ້ວຍໝູຊື່ວັດທະກີ

(ຊະດິນໂກງເຫັນເສືອໂຄ່ງກັບມາໂຕເປົ່າ ຈຶ່ງກ່າວກັບເສືອໂຄ່ງວ່າ)

[໙໗] ເຈົ້າເສືອໂຄ່ງ ໃນວັນກ່ອນເຈົ້າທ່ຽວທຳລາຍເຫຼົ່າໝູໃນທີ່ນີ້
ແຕ່ບັດນີ້ ເຈົ້າຊົບເຊົາເຫງົາກັບມາແຕ່ຜູ້ດຽວ
ວັນນີ້ ເຈົ້າບໍ່ມີແຮງບໍ ເສືອໂຄ່ງ

(ເສືອໂຄ່ງໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໙໘] ໄດ້ຍິນວ່າ ໃນວັນກ່ອນໝູເຫຼົ່ານີ້ເຫັນຂ້າພະເຈົ້າແລ້ວເກີດຄວາມຢ້ານ
ພາກັນແຍກຍ້າຍແລ່ນໜີຕາຍໄປຫາບ່ອນຊຸກຊ່ອນໂຕລະທິດລະທາງ
ແຕ່ວັນນີ້ໝູເຫຼົ່ານັ້ນມາຢູ່ໂຮມກັນໃນໄຊຍະພູມທີ່ຂ້າພະເຈົ້າຈະທຳລາຍໄດ້ຍາກ

(ເທວະດາທີ່ສິງສະຖິດຢູ່ໃນເຂດປ່ານັ້ນໄດ້ກ່າວວ່າ)

[໙໙] ຂ້າພະເຈົ້າຂໍນອບນ້ອມຝູງໝູທີ່ມາປະຊຸມພ້ອມກັນ
ຂ້າພະເຈົ້າເຫັນດ້ວຍຕົວເອງເຊິ່ງມິດຕະພາບອັນບໍ່ເຄີຍຜາກົດມາກ່ອນ
ຈຶ່ງກ່າວສັນເສີນຝູງໝູທີ່ມີແຂ້ວເປັນກຳລັງຈຶ່ງຊະນະເສືອໂຄ່ງໄດ້
ແລະພົ້ນມໍຣະນະໄພໄດ້ດ້ວຍຄວາມສາມັກຄີ

**ວັດທະກີສູກະຣະຊາດົກທີ ໓ ຈົບ**

# ໔. ສິຣິຊາດົກ (໘໗໔)
## ວ່າດ້ວຍສົມບັດເກີດຂຶ້ນແກ່ຜູ້ມີບຸນ

(ພຣະສາດສະດາຊົງນຳອະດີດນິທານມາສະແດງແລ້ວ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ)

[໑໐໐] ຜູ້ບໍ່ມີບຸນຈະມີສິລະປະຫຼືບໍ່ມີສິນປະກໍຕາມທີ
ຂວນຂວາຍລວບລວມຊັບໃດໄວ້ເປັນຈຳນວນຫຼາຍ
ຊັບນັ້ນຜູ້ມີບຸນຍ່ອມໄດ້ໃຊ້ສອຍ

[໑໐໑] ສົມບັດຈຳນວນຫຼາຍລ່ວງເລີຍຄົນເຫຼົ່າອື່ນໄປສາ
ຍ່ອມເກີດຂຶ້ນແກ່ຜູ້ທຳບຸນໄວ້ໃນທີ່ທັງປວງທີ່ນັ້ນ
ແມ່ນຣັດຕະນະທັງຫຼາຍກໍເກີດຂຶ້ນໃນທີ່ບໍ່ແມ່ນບໍ່ເກີດແຫ່ງຣັດຕະນະ

(ພຣະສາດສະດາເມື່ອຈະຊີ້ງສະແດງຣັດຕະນະເຫຼົ່ານັ້ນ ຈຶ່ງຕັດວ່າ)

[໑໐໔] ໄກ່ ແກ້ວ ມະໜີ ໄມ້ເທົ້າ ແລະຍິງຊື່ປຸນຍະລັກຂະນາເທວີ
ເກີດຂຶ້ນແກ່ອະນາຖະບິນທິກະເສດຖີຜູ້ບໍ່ເຮັດບາບເຮັດແຕ່ບຸນໄວ້ແລ້ວ

**ສິຣິຊາດົກທີ ໔ ຈົບ**

# ໕. ມະນິສູກະຣະຊາດົກ (໔໗໕)
## ວ່າດ້ວຍໝູພະຍາຍາມທຳລາຍແກ້ວມະນີ

(ໝູທັງຫຼາຍບໍ່ເຫັນອຸບາຍຈຶ່ງເຂົ້າໄປຫາດາບົດໂພທິສັດໄຫວ້ແລ້ວ ຈຶ່ງກ່າວວ່າ)

[໑໐໓] ພວກຂ້າພະເຈົ້າປະມານ ໓໐ ຕົວ
ໄດ້ອາໄສຢູ່ໃນຖ້ຳແກ້ວມະນີເຖິງ ໗ ປີ
ໄດ້ເປີກສາກັນວ່າ ພວກເຮົາຈະທຳລາຍປະກາຍຂອງແກ້ວມະນີ

[໑໐໔] ແກ້ວມະນີກັບຜ່ອງໃສຍິ່ງຂຶ້ນ
ຕະຫຼອດເວລາທີ່ພວກຂ້າພະເຈົ້າສູງດສີມັນຢູ່
ບັດນີ້ ພວກຂ້າພະເຈົ້າຂໍຖາມເຖິງກິດນີ້
ທ່ານເຂົ້າໃຈກິດນີ້ແນວໃດໃນເລື້ອງນີ້

(ດາບົດໂພທິສັດບອກແກ່ໝູເຫຼົ່ານັ້ນວ່າ)

[໑໐໕] ແກ້ວໄພທູນນີ້ບໍລິສຸດງາມຜ່ອງໃສ
ບໍ່ມີໃຜສາມາດຈະທຳລາຍຣັດສະໝີຂອງແກ້ວໄພທູນນັ້ນໃຫ້ເສຍຫາຍໄດ້
ໝູທັງຫຼາຍ ພວກທ່ານຈົ່ງພາກັນໜີໄປເທີ້ນ

**ມະນິສູກະຣະຊາດົກທີ ໕ ຈົບ**

# ໖. ສາລູກະຊາດົກ (໔໗໖)
## ວ່າດ້ວຍໝູສາລູກະຖືກລ້ຽງໄວ້ຂ້າ

(ງົວມະຫາໂລຫິດໂພທິສັດໄດ້ກ່າວກັບງົວຈູລະໂລຫິດຜູ້ນ້ອງວ່າ)

[໑໐໖] ເຈົ້າຢ່າປາຖະໜາເປັນເຊັ່ນໝູສາລູກະເລີຍ
ເພາະໝູສາລູກະນີ້ກິນອາຫານທີ່ເຮັດໃຫ້ເດືອດຮ້ອນ

ເຈົ້າຢ່າທະເຍີທະຍານໄປຫຼາຍ ຈົ່ງກິນຕົ້ນເຂົ້າລີບເທີ້ນ
ນັ້ນເປັນເຫດແຫ່ງຄວາມເປັນຜູ້ມີອາຍຸຍືນ

[໑໐໗] ອີກບໍ່ດົນຫຼາຍ ຂ້າຣາດຊະສຳນັກພ້ອມກັບບໍລິວານນັ້ນ
ຈະເປັນແຂກມາບ່ອນນີ້
ຕອນນັ້ນເຈົ້າຈະເຫັນໝູສາລູກະຖືກຕີດ້ວຍສາກນອນຕາຍຢູ່

(ພຣະສາດສະດາຕັດພຣະຄາຖານີ້ວ່າ)

[໑໐໘] ເມື່ອເຫັນໝູສາລູກະຖືກຂ້າດ້ວຍສາກນອນຕາຍຖືກປາດຢູ່
ງົວແກ່ທັງ ໔ ໄດ້ຄິດວ່າ ຕົ້ນເຂົ້າລີບຂອງພວກເຮົາທີ່ນັ້ນປະເສີດທີ່ສຸດ

**ສາລູກະຊາດົກທີ ໖ ຈົບ**

## ໗. ລາພະຄະຣະຫະຊາດົກ (໔໗໗)
## ວ່າດ້ວຍວິທີການຫຼອກລວງເພື່ອສະແຫວງຫາລາບ

(ອາຈານທິສາປາໂມກໂພທິສັດໄດ້ຕັດກັບມານົບຜູ້ເປັນສິດວ່າ)

[໑໐໙] ບໍ່ບ້າກໍເຮັດເປັນເໝືອນຄົນບ້າ
ບໍ່ແມ່ນຄົນສໍ່ສຽດກໍເຮັດເປັນເໝືອນຄົນສໍ່ສຽດ
ບໍ່ແມ່ນນັກຟ້ອນລຳກໍເຮັດເປັນເໝືອນນັກຟ້ອນລຳ
ບໍ່ຕື່ນຂ່າວກໍເຮັດເປັນເໝືອນຕື່ນຂ່າວ
ຍ່ອມໄດ້ລາບໃນບຸກຄົນທີ່ລຸ່ມຫຼົງງົມງາຍ
ນີ້ເປັນຄຳສອນສຳລັບທ່ານ

(ລູກສິດໄດ້ຟັງຄຳຂອງອາຈານແລ້ວ ຈຶ່ງຕິຕຽນລາບວ່າ)

[໑໑໐] ພາມ ໜ້າຕິຕຽນການໄດ້ຍົດ
ແລະການໄດ້ຊັບສຳລັບລ້ຽງຊີວິດ
ເຊິ່ງເປັນເຫດໃຫ້ປະສົບຄວາມພິນາດ
ຫຼືປະພຶດບໍ່ເປັນທຳ

[໑໑໑] ເຖິງແມ່ນເຮົາຈະເປັນນັກບວດຖືບາດລ້ຽງຊີບ

ການລ້ຽງຊີບເຊັ່ນນັ້ນແລຍັງດີກວ່າການສະແຫວງຫາໂດຍບໍ່ຊອບທຳ

**ລາພະຄະຣະທະຊາດົກທີ ໗ ຈົບ**

## ໗. ມັດສຸດທານະຊາດົກ (໔໗໗)
## ວ່າດ້ວຍບຸນທີ່ໃຫ້ທານແກ່ປາ

(ກຸດຸມພີໂພທິສັດກວດເບິ່ງທໍ່ຊັບແລ້ວຈຳກາຂອງຕົນໄດ້ ຈຶ່ງກ່າວວ່າ)

[໑໑໔] ປາທັງຫຼາຍມີຣາຄາເກີນກວ່າ ໑,໐໐໐ ກະຫາປະນະ
ກັບ ໗ ມາສົກ ບໍ່ມີຄົນທີ່ຈະເຊື່ອເລື້ອງນີ້
ແຕ່ສຳລັບຂ້າພະເຈົ້າມີເງິນຢູ່ ໗ ມາສົກ
ກໍຊື້ປາພວງນັ້ນໄດ້

(ເທວະດາປະຈຳແມ່ນ້ຳຜາກົດກາຍຢູ່ໃນອາກາດ ກ່າວວ່າ)

[໑໑໕] ທ່ານໄດ້ໃຫ້ອາຫານແກ່ຝູງປາແລ້ວອຸທິດສ່ວນກຸສົນໃຫ້ແກ່ຂ້າພະເຈົ້າ
ເມື່ອຣະນຶກເຖິງສ່ວນກຸສົນນັ້ນແລະຄວາມອ່ອນນ້ອມທີ່ທ່ານໄດ້ທຳແລ້ວ
ຈຶ່ງຮັກສາຊັບຂອງທ່ານໄວ້

(ເທວະດາບອກການໂກງທີ່ນ້ອງຊາຍເຮັດແກ່ພຣະໂພທິສັດວ່າ)

[໑໑໔] ຜູ້ໃດເຮັດກຳຊົ່ວ
ລໍ້ລວງເອົາຊັບສົມບັດຂອງອ້າຍນ້ອງຊາຍຂອງພໍ່ແມ່
ຜູ້ນັ້ນຈັດວ່າເປັນຜູ້ມີຈິດຊົ່ວຮ້າຍ
ຍ່ອມບໍ່ມີຄວາມຈະເລີນ
ແມ່ນເທວະດາກໍບໍ່ນັບຖືເຂົາ

**ມັດສຸດທານະຊາດົກທີ ໗ ຈົບ**

## ໘. ນານາສັນທະຊາດົກ (໔໗໘)
## ວ່າດ້ວຍຄວາມຕ້ອງການທີ່ຕ່າງກັນ

(ພາມກ່າວກັບພຣະໂພທິສັດວ່າ)

[໑໑໕] ຂ້າແດ່ມະຫາຣາດເຈົ້າ ຂ້າພຣະອົງທັງຫຼາຍຢູ່ໃນເຮືອນຫຼັງດຽວກັນ

ແຕ່ມີຄວາມຕ້ອງການຕ່າງກັນ ຄື ຂ້າພຣະອົງຕ້ອງການບ້ານສ່ວຍ
ສ່ວນນາງພາມມະນີຕ້ອງການແມ່ງົວນົມ ໑໐໐ ຕົວ

[໑໑໖] ບຸດຂອງຂ້າພຣະອົງຕ້ອງການລົດທຽມດ້ວຍມ້າອາຊາໄນ
ຍິງສະໃພ້ຕ້ອງການຕຸ້ມຫູແກ້ວມະນີ
ສ່ວນນາງປຸນນິກາທາສີຜູ້ຕ່ຳຕ້ອຍຕ້ອງການຄົກ
ກະດົ້ງ ແລະສາກ ຂ້ານ້ອຍ

(ພຣະໂພທິສັດຕັດວ່າ)

[໑໑໗] ທ່ານທັງຫຼາຍຈົ່ງໃຫ້ບ້ານສ່ວຍແກ່ພາມ
ແມ່ງົວນົມ ໑໐໐ ຕົວແກ່ນາງພາມມະນີ
ລົດທຽມມ້າອາຊາໄນແກ່ບຸດຂອງພາມ
ຕຸ້ມຫູແກ້ວມະນີແກ່ຍິງສະໃພ້
ແລະຄົກ ກະດົ້ງ ສາກແກ່ນາງປຸນນິກາທາສີຜູ້ຕ່ຳຕ້ອຍ

**ນານາສັນທະຊາດົກທີ ໗ ຈົບ**

## ໑໐. ສີລະວີມັງສະກະຊາດົກ (໔໗໐)
## ວ່າດ້ວຍການພິຈາລະນາອານິສົງຂອງສີນ

(ພາມໄດ້ຂາບທູນພຣະຣາຊາເຖິງການກະທຳຂອງຕົນເພາະຕ້ອງການຈະທົດລອງ ສີນວ່າ)

[໑໑໘] ໄດ້ຍິນວ່າ ສີນເປັນສິ່ງທີ່ດີງາມ
ສີນເປັນສິ່ງທີ່ປະເສີດໃນໂລກ
ເບິ່ງເທີ້ນ ນາກທີ່ມີພິດຮ້າຍແຮງຍັງບໍ່ກ້າບຽດບຽນຜູ້ອື່ນ
ເພາະສຳນຶກຢູ່ວ່າຕົນມີສີນ

[໑໑໙] ເຮົາຈັກສະມາທານສີນທີ່ບັນດິດຮັບຮອງວ່າ
ເປັນສິ່ງທີ່ປອດໄພໃນໂລກ
ເຊິ່ງເປັນເຫດໃຫ້ຜູ້ມີສີນໄດ້ຮັບການຂະໜານນາມວ່າ
ເປັນຜູ້ປະພຶດຂໍ້ປະຕິບັດຂອງພຣະອະຣິຍະ

[໑໒໐] ຜູ້ມີສີນເປັນທີ່ຮັກຂອງໝູ່ຍາດ
ແລະຮຸ່ງເຮືອງໃນໝູ່ມິດ

ຫຼັງຈາກຕາຍແລ້ວຈະໄປສູ່ສຸຄະຕິ

**ສີລະວີມັງສະກະຊາດົກທີ ໑໐ ຈົບ**

**ອັບພັນຕະຣະວັກທີ ໔ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ອັບພັນຕະຣະຊາດົກ | ໒. ເສີຍຍະຊາດົກ |
| ໓. ວັດທະກີສູກະຣະຊາດົກ | ໔. ສີຣິຊາດົກ |
| ໕. ມະນີສູກະຣະຊາດົກ | ໖. ສາລູກະຊາດົກ |
| ໗. ລາພະຄະຣະຫະຊາດົກ | ໘. ມັດສຸດທານະຊາດົກ |
| ໙. ນານາສັນທະຊາດົກ | ໑໐. ສີລະວີມັງສະກະຊາດົກ |

# ໕. ກຸມພະວັກ
## ໝວດວ່າດ້ວຍໝົ້ສົມບັດ

## ໑. ພັດທະຣະຄະຕະເພທະກະຊາດົກ (໔໙໑)
## ວ່າດ້ວຍຄົນຈົ້າຍ່ອມເດືອດຮ້ອນເພາະທຳລາຍໝົ້ສົມບັດ

(ພຣະສາດສະດາຊົງສະແດງພຣະທຳມະເທດສະໜາປະມວນຊາດົກ ຕັດພຣະຄາຖາວ່າ)

[໑໔໑] ບັກເລງໄດ້ໝົ້ທີ່ສາມາດຈະບັນດານສິ່ງທີ່ປາຖະໜາໄດ້ທຸກຢ່າງ
ເຂົາຍ່ອມປະສົບຄວາມສຸກ
ຕະຫຼອດເວລາທີ່ຍັງຮັກສາໝົ້ນັ້ນໄວ້ໄດ້

[໑໔໒] ເມື່ອໃດ ເຂົາເມົາສຸຣາ ຄະນອງ
ທຳລາຍໝົ້ສາຍ້ອນຄວາມເມົາ
ເມື່ອນັ້ນ ເຂົາຈະເປັນຄົນເປືອຍນຸ່ງຫົ່ມຜ້າເກົ່າ
ກາຍເປັນຄົນໂງ່ເງົ່າເດືອດຮ້ອນໃນພາຍຫຼັງ

[໑໔໓] ຜູ້ໃດໂງ່ຈົ້າ ຜະໝາດ ໄດ້ຊັບແລ້ວໃຊ້ສອຍໄປທຳນອງນີ້
ຜູ້ນັ້ນຍ່ອມເດືອດຮ້ອນໃນພາຍຫຼັງ

ເໝືອນນັກເລງທຳລາຍໝໍ້ຊຸມຊັບ

**ພັດທະຣະຄະຕະເພທະກະຊາດົກທີ ໑ ຈົບ**

## ໘. ສຸປັດຕະຊາດົກ (໒໙໒)
## ວ່າດ້ວຍເມຍພະຍາກາສຸປັດຕະແພ້ທ້ອງ

(ກາຂາບທູນພຣະຣາຊາເຖິງເຫດທີ່ຕົນທຳຄວາມຊົ່ວວ່າ)

[໑໘໔] ຂ້າແດ່ມະຫາຣາດ ພະຍາກາຊື່ສຸປັດຕະ
ມີບໍລິວານ ໗໐,໐໐໐ ຕົວແວດລ້ອມ ອາໄສຢູ່ທີ່ເມືອງພາຣານະສີ

[໑໘໕] ເມຍພະຍາການັ້ນຊື່ນາງສຸປັດສາແພ້ທ້ອງ
ຕ້ອງການຈະກິນພຣະກະຍາຫານຂອງພຣະຣາຊາອັນມີຄ່າຫຼາຍ
ທີ່ພວກພໍ່ຄົວປຸງແຕ່ງແລ້ວໃນຫ້ອງເຄື່ອງ

[໑໘໖] ຂ້າພຣະອົງເປັນທູດຂອງກາເຫຼົ່ານັ້ນ
ຖືກພະຍາກາສົ່ງມາ ຈຶ່ງໄດ້ມາ ໃນບ່ອນນີ້
ຂ້າພຣະອົງຈະທຳຄວາມຈົງຮັກພັກດີຕໍ່ເຈົ້ານາຍ
ຈຶ່ງໄດ້ຈິກດັງຄົນເຊີນເຄື່ອງສະເຫວີຍໃຫ້ເປັນບາດ

**ສຸປັດຕະຊາດົກທີ ໘ ຈົບ**

## ໙. ກາຍະນິບພິນທະຊາດົກ (໒໙໓)
## ວ່າດ້ວຍຄວາມເບື່ອໜ່າຍຮ່າງກາຍ

(ລືສີໂພທິສັດເມື່ອຈະເປ່ງອຸທານ ຈຶ່ງກ່າວວ່າ)

[໑໘໗] ເມື່ອເຮົາຖືກໂຣກໄພແນວໃດແນວໜຶ່ງບຽດບຽນຢູ່
ໄດ້ຮັບທຸກຢ່າງແຮງກ້າ
ຮ່າງກາຍນີ້ຈັກຫ່ຽວແຫ້ງໂດຍທັນທີ
ເໝືອນດອກໄມ້ຕົກຢູ່ຊາຍກາງແດດ

[໑໘໘] ຮ່າງກາຍອັນບໍ່ໜ້າພໍໃຈກັບເປັນສິ່ງທີ່ໜ້າພໍໃຈ
ບໍ່ສະອາດກັບເຂົ້າໃຈວ່າເປັນສິ່ງທີ່ສະອາດ

ເຕັມໄປດ້ວຍຊາກສົບນານາຊະນິດ
ຜາກົດເປັນທີ່ໜ້າພໍໃຈແກ່ຜູ້ບໍ່ເຫັນຄວາມຈິງ

[໑໔໗] ໜ້າຕິຕຽນຫຼາຍ ຮ່າງກາຍອັນເປື່ອຍເນົ່າ ກະສັບກະສ່າຍ
ໜ້າກຽດຊັງ ບໍ່ສະອາດ ມີຄວາມເຈັບປ່ວຍເປັນທຳມະດາ
ທີ່ໝູ່ສັດພາກັນມົວເມົາມົກມຸ່ນຢູ່
ແລ້ວເຮັດທາງທີ່ຈະເຂົ້າເຖິງສຸກຄະຕິໃຫ້ເສື່ອມ

**ກາຍະນິບພິນທະຊາດົກທີ ໓ ຈົບ**

# ໔. ຊຳພຸຂາທະກະຊາດົກ (໔໗໔)
## ວ່າດ້ວຍໝາຈອກຢາກກິນໝາກຫວ້າ

(ໝາຈອກໂຕໜຶ່ງຕ້ອງການຈະຫຼອກກາກິນໝາກຫວ້າແກ້ງສັນເສີນກາວ່າ)

[໑໓໐] ໃຜນັ້ນມີສຽງຍົດຍ້ອຍປະເສີດ
ກວ່າສັດທີ່ມີສຽງມ່ວນທັງຫຼາຍ ຈັບຢູ່ທີ່ງ່າຕົ້ນຫວ້າ
ເຈຣະຈາດ້ວຍສຳນຽງອັນໜ້າພໍໃຈ ຄ້າຍລູກນົກຍູງ

(ກາສັນເສີນຕອບໝາຈອກວ່າ)

[໑໓໑] ກຸນລະບຸດຮູ້ຈັກສັນເສີນກຸນລະບຸດນຳກັນ
ນີ້ທ່ານຜູ້ມີຜິວພັນເຊັ່ນກັບລູກເສືອໂຄ່ງ
ເຊີນທ່ານບໍຣິໂພກເທີ້ນເພື່ອນ
ເຮົາຈະໃຫ້ໝາກຫວ້າສຸກແກ່ທ່ານ

(ເທວະດາໂພທິສັດເຫັນກາກັບໝາຈອກກ່າວຍ້ອງຍໍກັນຕາມທີ່ບໍ່ເປັນຈິງ ຈຶ່ງກ່າວວ່າ)

[໑໓໔] ເຮົາເຫັນມານານແລ້ວ
ຄົນທີ່ມາປະຊຸມກັນເວົ້າຕົວະ ສັນເສີນກັນເອງ
ຄື ກາກິນອາຫານທີ່ເຂົາຄາຍແລ້ວແລະໝາຈອກກິນຊາກສົບ

**ຊຳພຸຂາທະກະຊາດົກທີ ໔ ຈົບ**

## ໕. ອັນຕະຊາດົກ (໔໙໕)
### ວ່າດ້ວຍທີ່ສຸດ ໓ ຢ່າງ

(ກາໂຕໜຶ່ງຕ້ອງການຈະລວງໝາຈອກກິນຊີ້ນ ຈຶ່ງກ່າວວ່າ)

[໑໑໑] ພະຍາເນື້ອ ລຳຕົວຂອງທ່ານເໝືອນພະຍາງົວອຸສະພະ
ການຍົວຣະຍາດຂອງທ່ານຄືດັ່ງພະຍາຣາດຊະສີ
ຂ້າພະເຈົ້າຂໍນອບນ້ອມທ່ານ ຂ້າພະເຈົ້າຈະໄດ້ອັນໃດແດ່ນໍ

(ໝາຈອກໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໑໔] ກຸນລະບຸດຮູ້ຈັກສັນເສີນກຸນລະບຸດນຳກັນ
ນີ້ພໍ່ກາຜູ້ມີສ້ອຍຄໍງາມເໝືອນນົກຍູງ
ເຊີນທ່ານລົງຈາກຕົ້ນລະຫຸ່ງເທີ້ນ

(ຣຸກຂະເທວະດາໂພທິສັດເຫັນກິຣິຍາຂອງກາກັບໝາຈອກ ຈຶ່ງກ່າວວ່າ)

[໑໑໕] ບັນດາເນື້ອທັງຫຼາຍ
ໝາຈອກເປັນສັດທີ່ຊົ່ວທີ່ສຸດ
ບັນດາປັກສາທັງຫຼາຍ ກາເປັນສັດທີ່ຊົ່ວທີ່ສຸດ
ແລະບັນດາຣຸກຂະຊາດທັງຫຼາຍ ຕົ້ນລະຫຸ່ງເປັນຕົ້ນໄມ້ທີ່ຊົ່ວທີ່ສຸດ
ທີ່ສຸດ ໓ ຢ່າງ ມາປະຈວບພົບກັນເຂົ້າແລ້ວ

**ອັນຕະຊາດົກທີ ໕ ຈົບ**

## ໖. ສະມຸດທະຊາດົກ (໔໙໖)
### ວ່າດ້ວຍມະຫາສະມຸດ

(ເທວະດາໂພທິສັດປະຈຳມະຫາສະມຸດເຫັນກິຣິຍາຂອງກາ ຈຶ່ງກ່າວວ່າ)

[໑໑໖] ນີ້ໃຜນໍ ທ່ຽວບິນວຽນວົນຢູ່ຮອບທະເລນ້ຳເຄັມ
ຖ້າຫ້າມໝູ່ປາແລະໝູ່ມັງກອນຢູ່
ຈຶ່ງເດືອດຮ້ອນຢູ່ໃນກຽວຄື້ນ

(ການ້ຳໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໓໗] ຂ້າພະເຈົ້າເປັນນົກຊື່ອະນັນຕະປາຍີ
ຜາກົດໄປທົ່ວທຸກທິດວ່າ ເປັນຜູ້ບໍ່ຮູ້ຈັກອີ່ມ
ຕ້ອງການຈະດື່ມນ້ຳໃນສະມຸດສາຄອນ
ອັນເປັນເຈົ້າແຫ່ງແມ່ນ້ຳລຳທານ

(ເທວະດາປະຈຳມະຫາສະມຸດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໓໘] ຫ້ວງນ້ຳໃຫຍ່ນີ້ນັ້ນຈະລຸດລົງຫຼືເຕັມຢູ່ກໍຕາມ
ທີ່ສຸດຂອງນ້ຳແຫ່ງຫ້ວງນ້ຳໃຫຍ່ນັ້ນທີ່ບຸກຄົນດື່ມແລ້ວ
ໃຜ ໆ ກໍຮູ້ບໍ່ໄດ້
ໄດ້ຍິນວ່າ ສາຄອນອັນຜູ້ໃດບໍ່ອາດດື່ມໃຫ້ໝົດສິ້ນໄປໄດ້

**ສະມຸດທະຊາດົກທີ ໖ ຈົບ**

## ໗. ກາມະວິລາປະຊາດົກ (໘໗)
## ວ່າດ້ວຍຜູ້ເພີ້ເຖິງກາມ

(ບຸຣຸດຜູ້ທີ່ຖືກສຽບຢູ່ເທິງປາຍຫຼາວເຫັນກາບິນມາທາງອາກາດ ຮຽກກາມາເພື່ອຈະສົ່ງຂ່າວເຖິງພັນລະຍາສຸດທີ່ຮັກ ຈຶ່ງກ່າວວ່າ)

[໑໓໙] ນົກຜູ້ມີປີກເປັນຍານພາຫະນະບິນໄດ້ສູງ
ຂໍທ່ານຊ່ວຍບອກພັນລະຍາຂອງຂ້າພະເຈົ້າ
ຜູ້ມີຂາອ່ອນຄືດັ່ງລຳຕົ້ນກ້ວຍໃຫ້ຮູ້ດ້ວຍ
ເມື່ອນາງບໍ່ຮູ້ຈັກຄອຍຖ້າຂ້າພະເຈົ້າເປັນເວລານານ

[໑໔໐] ນາງເອງເປັນຄົນໂຫດຮ້າຍ ຍັງບໍ່ຮູ້ວ່າຫຼາວນີ້ເຂົາປັກໄວ້
ເພື່ອສຽບປະຈານຂ້າພະເຈົ້າ ກໍຈະໂກດ
ຄວາມໂກດຂອງນາງຍ່ອມເຮັດໃຫ້ຂ້າພະເຈົ້າເດືອດຮ້ອນ
ແຕ່ຫຼາວໃນທີ່ນີ້ບໍ່ເຮັດໃຫ້ຂ້າພະເຈົ້າເດືອດຮ້ອນເລີຍ

[໑໔໑] ຫອກ ເກາະ ແລະແຫວນວົງນ້ອຍ ໆ ທີ່ເຮັດດ້ວຍທອງເນື້ອຫ້າ
ອັນໜຶ່ງ ຜ້າແຄວ້ນກາສີອັນມີເນື້ອລະອຽດ
ຂ້າພະເຈົ້າໄດ້ເກັບໄວ້ຢູ່ຫົວນອນ
ຂໍນາງຜູ້ມີຄວາມຕ້ອງການດ້ວຍຊັບ

ຈຶ່ງຍິນດີດ້ວຍຊັບທີ່ມີປະມານເທົ່ານີ້ເທີ້ນ

**ກາມະວິລາປະຊາດົກທີ ໗ ຈົບ**

## ໘. ອຸທຸມພະຣະຊາດົກ (໒໙໘)
## ວ່າດ້ວຍລິງຫຼອກລິງດ້ວຍໝາກເດື່ອ

(ລິງໃຫຍ່ໜ້າດໍາໂຕໜຶ່ງຄິດຈະຫຼອກລິງນ້ອຍເພື່ອຢຶດບ່ອນຢູ່ ຈຶ່ງກ່າວກັບລິງນ້ອຍວ່າ)

[໑໘໔] ຕົ້ນໝາກເດື່ອ ຕົ້ນໄຮ ແລະຕົ້ນໝາກຂວິດເຫຼົ່ານີ້ມີໝາກສຸກ
ເຈົ້າຈົ່ງອອກມາກິນເທີ້ນ
ຈະຍອມຕາຍຍ້ອນຄວາມຫິວເຮັດຫຍັງ

(ລິງນ້ອຍ ໆ ເຊື່ອແລ້ວໄປ ແຕ່ບໍ່ໄດ້ອັນໃດ ຈຶ່ງກັບມາພົບລິງໃຫຍ່ແລ້ວຄິດຈະຫຼອກລິງໃຫຍ່ນັ້ນຄືນ ຈຶ່ງກ່າວວ່າ)

[໑໘໕] ຜູ້ໃດອ່ອນນ້ອມຕໍ່ຜູ້ໃຫຍ່
ຜູ້ນັ້ນຍ່ອມເປັນຜູ້ອີ່ມໜໍາສໍາຮານ
ເໝືອນຂ້າພະເຈົ້າໄດ້ກິນໝາກໄມ້ສຸກຈົນອີ່ມໜໍາສໍາຮານໃນວັນນີ້

(ລິງໃຫຍ່ໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໘໖] ລິງຫຼອກລິງປ່າຍ້ອນເຫດໃດ
ເຫດນັ້ນລິງໜຸ່ມກໍບໍ່ຄວນເຊື່ອ
ເຖິງລິງແກ່ເຖົ້າກໍບໍ່ຄວນເຊື່ອ

**ອຸທຸມພະຣະຊາດົກທີ ໘ ຈົບ**

## ໙. ໂກມາຣິຍະປຸດຕະຊາດົກ (໒໙໙)
## ວ່າດ້ວຍລິງອ້າງໂກມາຣິຍະບຸດເປັນອາຈານ

(ດາບົດເຫຼົ່ານັ້ນເມື່ອຈະຖາມລິງ ໄດ້ກ່າວວ່າ)

[໑໘໗] ເມື່ອກ່ອນ ເຈົ້າໄດ້ເຕັ້ນຫຼິ້ນຄະນອງ
ໃນສໍານັກຂອງພວກເຮົາຜູ້ມີປົກກະຕິຫຼິ້ນຄະນອງ
ລິງເອີຍ ເຈົ້າມາເຮັດກິຣິຍາຂອງລິງໃນອາສົມຂອງພວກເຮົາອີກ

ພວກເຮົາບໍ່ພໍໃຈປົກກະຕິຂອງເຈົ້າເລີຍ

(ລີງໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໘໕] ເພາະຊານອັນບໍລິສຸດຢ່າງຍິ່ງ ຂ້າພະເຈົ້າໄດ້ສະດັບມາແລ້ວ
ຈາກສຳນັກອາຈານຊື່ໂກມາຣິຍະບຸດຜູ້ເປັນພະຫູສູດ
ບັດນີ້ ທ່ານຢ່າໄດ້ສຳຄັນຂ້າພະເຈົ້າເໝືອນເມື່ອກ່ອນເລີຍ
ຜູ້ມີອາຍຸ ຂ້າພະເຈົ້າພໍ່າເພັງຊານຢູ່

(ດາບົດເຫຼົ່ານັ້ນກ່າວວ່າ)

[໑໘໖] ແມ່ນຖ້າບຸກຄົນຈະເພິ່ງຫວ່ານພືດລົງເທິງແຜ່ນຫີນ
ແລະຝົນຈະເພິ່ງຕົກລົງມາກໍຕາມ
ພືດນັ້ນຈະເພິ່ງງອກຂຶ້ນມາກໍເປັນໄປບໍ່ໄດ້
ເຈົ້າລີງເອີຍ ຈິງຢູ່ ຊານອັນບໍລິສຸດຢ່າງຍິ່ງ
ເຖິງເຈົ້າຈະໄດ້ສະດັບມາແລ້ວ
ເຈົ້າກໍຍັງຢູ່ຫ່າງໄກຈາກພູມຊານນັ້ນຢູ່ດີ

**ໂກມາຣິຍະປຸດຕະຊາດົກທີ ໙ ຈົບ**

## ໑໐. ອະກະຊາດົກ (໓໐໐)
## ວ່າດ້ວຍໝາໄນ

(ພຣະສາດສະດາຕັດພຣະຄາຖາເຫຼົ່ານີ້ວ່າ)

[໑໘໗] ມາໄນມີເນື້ອແລະເລືອດເປັນອາຫານ
ມີຊີວິດຢູ່ໄດ້ເພາະຂ້າສັດອື່ນ
ສະມາທານວັດແລ້ວເຂົ້າຈຳອຸໂປສົດ

[໑໘໘] ທ້າວສັກກະຊົງຮູ້ເຖິງຂໍ້ປະຕິບັດຂອງມາໄນນັ້ນແລ້ວ
ຊົງຈຳແລງເພດເປັນແບ້ເຂົ້າໄປຫາ
ມາໄນນັ້ນຕ້ອງການຈະດື່ມເລືອດຈຶ່ງຕະບະແຕກ
ແລ່ນເຂົ້າໄປຫາແບ້ນັ້ນ
ທຳລາຍຕະບະທີ່ຕົນໄດ້ສະມາທານແລ້ວ

[໑໕໐] ບຸກຄົນບາງຄົນໃນໂລກນີ້ກໍຄືກັນ
ສະມາທານຂໍ້ປະຕິບັດແບບຖືເບົາ
ເໝືອນມາໄນກັບກອກຍ້ອນແບ້ເປັນເຫດ

**ອະກະຊາດົກທີ ໑໐ ຈົບ**

**ກຸມພະວັກທີ ໕ ຈົບ**

# ລວມຊາດົກທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ພັດທະຣະຄະຕະເພທະກະຊາດົກ | ໖. ສຸປັດຕະຊາດົກ |
| ໒. ກາຍະນິບພິນທະຊາດົກ | ໗. ຊໍາພຸຂາທະກະຊາດົກ |
| ໓. ອັນຕະຊາດົກ | ໘. ສະມຸດທະຊາດົກ |
| ໔. ກາມະວິລາປະຊາດົກ | ໙. ອຸທຸມພະຣະຊາດົກ |
| ໕. ໂກມາຣິຍະປຸດຕະຊາດົກ | ໑໐. ອະກະຊາດົກ |

# ລວມວັກທີ່ມີໃນນິບາດນີ້ ຄື

| | |
|---|---|
| ໑. ສັງກັບປະວັກ | ໔. ປະທຸມະວັກ |
| ໒. ອຸທະປານະວັກ | ໕. ອັບພັນຕະຣະວັກ |
| ໓. ກຸມພະວັກ | |

**ຕິກະນິບາດ ຈົບ**

# ໔. ຈະຕຸກກະນິບາດ

## ໑. ກາລິງຄະວັກ

### ໝວດວ່າດ້ວຍພຣະເຈົ້າກາລິງຄະ

### ໑. ຈູລະກາລິງຄະຊາດົກ (໓໐໑)
### ວ່າດ້ວຍພຣະເຈົ້າຈູລະກາລິງຄະ

(ນັນທິເສນອຳມາດ ຮຽກຄົນຮັກສາປະຕູພຣະນະຄອນ ໃຫ້ເຂົາເປີດປະຕູຮັບພຣະຣາດຊະທິດາຂອງພຣະເຈົ້າອັດສະກະວ່າ)

[໑] ທ່ານທັງຫຼາຍຈົ່ງເປີດປະຕູຖວາຍພຣະຣາດຊະທິດາເຫຼົ່ານີ້
ຂໍພຣະຣາດຊະທິດາເຫຼົ່ານີ້ຈົ່ງສະເດັດເຂົ້າພຣະນະຄອນ
ເຊິ່ງຂ້າພະເຈົ້າຜູ້ມີນາມວ່ານັນທິເສນຜູ້ເປັນດັ່ງສີຫະ
ໄດ້ຮັບການສັ່ງສອນມາດີ ຜູ້ເປັນອຳມາດຂອງພຣະເຈົ້າອະຣຸນ
ໄດ້ຈັດການຮັກສາໄວ້ດີແລ້ວ

(ພຣະເຈົ້າກາລິງຄະຊົງຍ້ານຕໍ່ນໍຣະນະໄພ ຈຶ່ງດ່າດາບົດວ່າ)

[໒] ທ່ານຜູ້ປະພຶດພົມມະຈັນ ທ່ານໄດ້ກ່າວວ່າ
ໄຊຊະນະຈະມີແກ່ພຣະເຈົ້າກາລິງຄະ
ຜູ້ສາມາດຍ່ຳຍີບຸກຄົນທີ່ໃຜຍ່ຳຍີບໍ່ໄດ້
ສ່ວນຄວາມປຣາໄຊ ຄວາມຫາຍຍະນະຈະມີແກ່ພຣະເຈົ້າອັດສະກະ
ຄົນຊື່ຍ່ອມບໍ່ເວົ້າຕົວະ

(ດາບົດທູນຖາມທ້າວສັກກະວ່າ)

[໓] ຂ້າແດ່ທ້າວສັກກະ ພວກເທວະດາຍັງກ່າວຕົວະຢູ່ອີກບໍ
ບັນດາຄຳເຫຼົ່ານັ້ນ ຄຳສັດເປັນຊັບຢ່າງຍິ່ງ
ຂ້າແດ່ທ້າວມັກຄະວານເທວະຣາດຜູ້ເປັນໃຫຍ່ໃນແຜ່ນດິນ
ພຣະອົງຊົງອາໄສເຫດອັນໃດຈຶ່ງຕັດຄຳຕົວະ

(ທ້າວສັກກະຊົງສະດັບດັ່ງນັ້ນ ຈຶ່ງຕັດວ່າ)

[໔] ພາມ ທ່ານເຄີຍຟັງມາແລ້ວບໍ່ແມ່ນບໍ ເຂົາກ່າວກັນວ່າ
ເທວະດາທັງຫຼາຍກີດກັນຄວາມບາກບັ່ນຂອງຄົນໄວ້ບໍ່ໄດ້
ການເຝິກຕົນກໍດີ ຄວາມຕັ້ງໃຈໄວ້ຢ່າງໝັ້ນຄົງກໍດີ
ຄວາມມີໃຈບໍ່ແຕກແຍກກໍດີ ຄວາມບໍ່ທໍ້ຖອຍກໍດີ
ການຮຸກໃນເວລາທີ່ຄວນຮຸກກໍດີ ຄວາມພຽນອັນໝັ້ນຄົງກໍດີ
ຄວາມບາກບັ່ນຂອງຄົນກໍດີ ໄດ້ມີແກ່ພຣະເຈົ້າອັດສະກະ
ຍ້ອນເຫດນັ້ນແລ ໄຊຊະນະຈຶ່ງໄດ້ມີແກ່ພຣະເຈົ້າອັດສະກະ

**ຈູລະກາລິງຄະຊາດົກທີ ໑ ຈົບ**

## ໘. ມະຫາອັດສາໂຣຫະຊາດົກ (໓໐໘)

## ວ່າດ້ວຍພຣະເຈົ້າມຫາະຫາອັດສາໂຣຫະ

(ພຣະຣາຊາໂພທິສັດສະແດງທຳແກ່ພຣະໂອຣົດວ່າ)

[໔] ຜູ້ໃດເມື່ອໃຫ້ທານໃນບຸກຄົນທີ່ບໍ່ຄວນຈະໃຫ້
ບໍ່ໃຫ້ໃນບຸກຄົນທີ່ຄວນຈະໃຫ້
ຜູ້ນັ້ນແມ່ນປະສົບທຸກໃນເວລາມີອັນຕະລາຍ
ກໍຫາເພື່ອນຊ່ອຍເຫຼືອບໍ່ໄດ້
[໖] ຜູ້ໃດເມື່ອບໍ່ໃຫ້ທານໃນບຸກຄົນທີ່ບໍ່ຄວນຈະໃຫ້
ໃຫ້ທານໃນບຸກຄົນທີ່ຄວນຈະໃຫ້
ຜູ້ນັ້ນແມ່ນປະສົບທຸກໃນເວລາມີອັນຕະລາຍ
ກໍໄດ້ເພື່ອນທີ່ຈະຊ່ອຍເຫຼືອ
[໗] ການສະແດງຄຸນວິເສດແຫ່ງການກ່ຽວຂ້ອງຜູກພັນກັນສັນນິດ
ໃນຊົນທັງຫຼາຍຜູ້ບໍ່ເປັນພຣະອະຣິຍະ ໂອ້ອວດ ຍ່ອມຈະຂາດຜົນ
ສ່ວນການສະແດງຄຸນວິເສດແຫ່ງການກ່ຽວຂ້ອງເປັນຕົ້ນນັ້ນແມ່ນເລັກໜ້ອຍ
ເຊິ່ງບຸກຄົນເຮັດແລ້ວໃນຊົນທັງຫຼາຍ ຜູ້ເປັນພຣະອະຣິຍະ
ຊື່ກົງແລະຄົງທີ່ ຍ່ອມມີຜົນຫຼາຍ
[໘] ຜູ້ໃດໄດ້ເຮັດຄຸນງາມຄວາມດີໄວ້ກ່ອນ
ຜູ້ນັ້ນຊື່ວ່າໄດ້ເຮັດສິ່ງທີ່ເຮັດໄດ້ຍາກຍິ່ງໃນໂລກ
ພາຍຫຼັງເຂົາຈະເຮັດຫຼືບໍ່ເຮັດກໍຕາມທີ
ຊື່ວ່າເປັນຜູ້ຄວນແກ່ການບູຊາຢ່າງຍິ່ງ

**ມະຫາອັດສາໂຣຫະຊາດົກທີ ໘ ຈົບ**

## ໓. ເອກະຣາຊະຊາດົກ (໓໐໓)

## ວ່າດ້ວຍພຣະເຈົ້າເອກກະຣາດ

(ພຣະເຈົ້າທຸບພິເສນຊົງຂໍໂທດພຣະເຈົ້າເອກກະຣາດແລ້ວ ຕັດວ່າ)

[໗] ຂ້າແດ່ພຣະເຈົ້າເອກກະຣາດ ເມື່ອກ່ອນພຣະອົງສະເຫວີຍການມະຄຸນ
ທີ່ສົມບູນປະເສີດ ມາບັດນີ້ພຣະອົງຖືກໂຍນລົງໃນຂຸມອັນຊຸຂະ
ກໍຍັງບໍ່ຊົງລະພຣະສະຫວີວັນແລະພຣະກໍາລັງອັນມີຢູ່ແຕ່ກ່ອນ

(ພຣະເຈົ້າເອກກະຣາດຜູ້ເປັນພຣະໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງຕັດວ່າ)

[໑໐] ພຣະເຈົ້າທຸບພິເສນ ເມື່ອກ່ອນຂ້ານ້ອຍມີຂັນຕິ
ແລະຕະບະສົມປາຖະໜາມາແລ້ວ
ຂ້ານ້ອຍໄດ້ຂັນຕິແລະຕະບະນັ້ນແລ້ວ
ຈະເພິ່ງລະສະຫວີວັນແລະກໍາລັງອັນມີຢູ່ແຕ່ກ່ອນເຮັດຫຍັງນໍ

[໑໑] ພຣະອົງຜູ້ເຮືອງຍົດ ຜາກົດພຣະປີຊາຍານ
ຊົງທົນທານເປັນພິເສດ ຮູ້ວ່າ ວຽກງານທຸກຢ່າງ
ຂ້ານ້ອຍໄດ້ເຮັດສໍາເລັດຮຽບຮ້ອຍແລ້ວ
ທັງຍັງໄດ້ຍົດທີ່ສູງສົ່ງທີ່ບໍ່ເຄີຍໄດ້ມາກ່ອນ
ຍ້ອນເຫດໃດຈະເພິ່ງລະສະຫວີວັນແລະກໍາລັງອັນມີຢູ່ແຕ່ກ່ອນໄປນໍ

[໑໒] ພຣະອົງຜູ້ຈອມຊົນ ຂ້ານ້ອຍບັນເທົາຄວາມສຸກ
ດ້ວຍຄວາມທຸກ ແລະຂົ່ມຄວາມທຸກດ້ວຍຄວາມສຸກ
ສັດຕະບຸຣຸດເຊັ່ນຂ້ານ້ອຍວາງຕົນເປັນກາງໃນຄວາມສຸກແລະຄວາມທຸກ
ເພາະມີຄວາມເຢືອກເຢັນໃນພາວະທັງ ໒ ນັ້ນ

**ເອກະຣາຊະຊາດົກທີ ໓ ຈົບ**

## ໔. ທັດທະຣະຊາດົກ (໓໐໔)

## ວ່າດ້ວຍນາກທັດທະຣະ

(ນາກຈູລະທັດທະຣະອົດທົນຄວາມດູໝິ່ນບໍ່ໄດ້ ຈຶ່ງເວົ້າກັບນາກຜູ້ເປັນອ້າຍວ່າ)

[໑໓] ເຈົ້າອ້າຍທັດທະຣະວາຈາອັນຫຍາບຄາຍໃນມະນຸດໂລກເຫຼົ່ານີ້

ເຮັດໃຫ້ຂ້ານ້ອຍເດືອດຮ້ອນ
ພວກເດັກນ້ອຍຊາວບ້ານບໍ່ມີພິດນີ້ ດ່າຂ້ານ້ອຍຜູ້ມີພິດຮ້າຍວ່າ
ພວກສັດກິນກົບກິນຂຽດ ພວກສັດນໍ້າ

(ນາກມະຫາທັດທະຣະໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໔] ບຸກຄົນຜູ້ຖືກຂັບໄລ່ຈາກບ້ານເມືອງຂອງຕົນໄປຢູ່ຖິ່ນອື່ນ
ເພິ່ງສ້າງສາງໃຫຍ່ໄວ້ເກັບຄໍາເວົ້າທີ່ຫຍາບຄາຍ

[໑໕] ສະຖານທີ່ໃດ ປະຊາຊົນບໍ່ຮູ້ຈັກສັດໂດຍຊາດ ຫຼືໂດຍວິໄນ
ສະຖານທີ່ນັ້ນ ເຂົາເມື່ອຢູ່ໃນກຸ່ມຊົນທີ່ບໍ່ມີໃຜຮູ້ຈັກເລີຍ ບໍ່ຄວນມີມານະ

[໑໖] ຜູ້ມີປັນຍາແມ່ນຈະປຽບດ້ວຍໄຟປ່າ ເມື່ອຢູ່ຍັງຕ່າງຖິ່ນ
ກໍຄວນອົດທົນຄໍາເວົ້າຄຸກຄາມແມ່ນຂອງຜູ້ເປັນທາດ

**ທັດທະຣະຊາດົກທີ ໔ ຈົບ**

## ໕. ສີລະວີມັງສະຊາດົກ (໓໐໕)
## ວ່າດ້ວຍການທົດລອງສິນ

## (ພາມໂພທິສັດກ່າວກັບອາຈານວ່າ)

[໑໗] ຂຶ້ນຊື່ວ່າສະຖານທີ່ລັບສໍາລັບເຮັດກໍາຊົ່ວບໍ່ມີຢູ່ໃນໂລກ
ຕົ້ນໄມ້ທີ່ຂຶ້ນຢູ່ໃນປ່າກໍຍັງມີຄົນເຫັນ
ຄົນພານສໍາຄັນຢູ່ວ່າ ກໍາຊົ່ວນັ້ນເຮົາໄດ້ເຮັດໃນສະຖານທີ່ລັບ

[໑໘] ຂ້າພະເຈົ້າບໍ່ພົບສະຖານທີ່ລັບ ແມ່ນສະຖານທີ່ວ່າງກໍບໍ່ມີ
ໃນສະຖານທີ່ໃດ ຂ້າພະເຈົ້າຍັງບໍ່ຮູ້ວ່າວ່າງ
ແມ່ນສະຖານທີ່ນັ້ນ ກໍບໍ່ວ່າງຈາກຂ້າພະເຈົ້າ

(ພຣະສາດສະດາໄດ້ຕັດ ໔ ພຣະຄາຖານີ້ວ່າ)

[໑໙] ທຸຊັດຈະມານົບ ສຸຊັດຈະມານົບ ນັນທະມານົບ
ສຸກະວັດສະນະມານົບ ວັດຊະມານົບ ແລະອັດທຸວະສິນມານົບນັ້ນ
ມີຄວາມຕ້ອງການຍິງສາວ ຈຶ່ງພາກັນລະທໍາສາ

[໔໐] ສ່ວນພາມຜູ້ເຖິງຝັ່ງແຫ່ງທຳທັງປວງ ມີປັນຍາ
ມີຄວາມກ້າວໜ້າໃນສັດຈະທຳ ຕາມຮັກສາທຳຢູ່
ລະຖິ້ມອິດຖິລາບຍ້ອນເຫດອັນໃດນໍ?

**ສີລະວີມັງສະຊາດົກທີ ໕ ຈົບ**

## ໖. ສຸຊາຕາຊາດົກ (໓໐໖)

## ວ່າດ້ວຍພຣະນາງສຸຊາດາ

(ພຣະນາງສຸຊາດາເທວີທູນຖາມພຣະຣາຊາວ່າ)

[໔໑] ຂ້າແດ່ ພຣະອົງ ໝາກໄມ້ສີແດງກ້ຽງເກົາເຫຼົ່ານີ້
ທີ່ເກັບໄວ້ໃນຖາດຄຳ ມີຊື່ວ່າໝາກອັນໃດ
ຂ້ານ້ອຍທູນຖາມແລ້ວ
ຂໍພຣະອົງຈົ່ງຕັດບອກຂ້ານ້ອຍ

(ພຣະຣາຊາຊົງໂກດ ຈຶ່ງຕັດວ່າ)

[໔໒] ພຣະເທວີ ເມື່ອກ່ອນນາງເປັນຄົນຫົວໂລ້ນ
ນຸ່ງຜ້າເກົ່າມັດຖົງໄວ້ແອວ
ທ່ຽວເລືອກເກັບໝາກໄມ້ເຫຼົ່າໃດ
ນີ້ເປັນໝາກໄມ້ປະຈຳຕະກູນຂອງນາງ

[໔໓] ຍິງຕ່ຳຊາມຜູ້ນີ້ຢູ່ໃນຣາດຊະຕະກູນ
ຍ່ອມເດືອດຮ້ອນບໍ່ຍິນດີ
ໂພຄະທັງຫຼາຍຍ່ອມລະຜູ້ບໍ່ມີບຸນໄປ
ພວກທ່ານຈົ່ງນຳຍິງນີ້ກັບໄປໃນສະຖານທີ່ທີ່ນາງເກັບໝາກກະທັນຂາຍ

(ອຳມາດໂພທິສັດຄິດຊ່ອຍເຫຼືອພຣະນາງສຸຊາດາເທວີ ຈຶ່ງຂາບທູນວ່າ)

[໔໔] ຂ້າແດ່ ມະຫາຣາດ ໂທດຄືຄວາມຜະໝາດເລີນເລີ່ເຫຼົ່ານີ້
ຍ່ອມມີແກ່ຍິງຜູ້ໄດ້ຍົດ
ຂໍພຣະອົງໂຜດຊົງລະເວັ້ນແກ່ພຣະນາງສຸຊາດາ
ຂ້າແດ່ສົມມຸດຕິເທບ ຂໍພຣະອົງຢ່າຊົງພິໂຣດ
ຕໍ່ພຣະນາງສຸຊາດານັ້ນເລີຍ

**ສຸຊາຕາຊາດົກທີ ໖ ຈົບ**

# ໗. ປະລາສະຊາດົກ (໓໐໗)
# ວ່າດ້ວຍພາມໝັ່ນປັດໃບໄມ້

(ຣຸກຂະເທວະດາໂພທິສັດຖາມພາມຜູ້ອາໃສເຫງົ້າຕົ້ນໄມ້ວ່າ)

[໔໕] ພາມ ທ່ານກໍຮູ້ຢູ່ວ່າ
ໄມ້ໃບຕົ້ນນີ້ບໍ່ມີຈິດໃຈ ບໍ່ໄດ້ຍິນສຽງ ແລະບໍ່ມີຄວາມຮູ້ສຶກ
ຍ້ອນເຫດໃດ ທ່ານຈຶ່ງບໍ່ລືມ
ພຽນພະຍາຍາມຖາມຢູ່ເປັນນິດເຖິງການນອນເປັນສຸກ

(ພາມໄດ້ຟັງດັ່ງນັ້ນ ຈຶ່ງກ່າວຕອບວ່າ)

[໔໖] ຕົ້ນໄມ້ໃຫຍ່ຜາກົດໄດ້ໃນທີ່ໄກ
ຕັ້ງຢູ່ໃນພູມີປະເທດທີ່ງຮາບພຽງ ເປັນທີ່ສະຖິດຂອງເທບພະຍະດາ
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງນອບນ້ອມໄມ້ໃບຕົ້ນນີ້
ແລະເທບພະຍະດາຜູ້ສະຖິດຢູ່ໃນໄມ້ໃບຕົ້ນນີ້ ຍ້ອນເຫດແຫ່ງຊັບ

(ຣຸກຂະເທວະດາໂພທິສັດເຫຼື້ອມໃສຕໍ່ພາມ ຈຶ່ງກ່າວວ່າ)

[໔໗] ພາມ ຂ້າພະເຈົ້ານັ້ນເພ່ງເຖິງ
ຄວາມເປັນຜູ້ຮູ້ອຸປະກາຣະຄຸນທີ່ທ່ານເຮັດແລ້ວ
ຈັກຕອບແທນທ່ານຕາມອານຸພາບຂອງຕົນ
ກໍການທີ່ທ່ານມາໃນສຳນັກຂອງສັດຕະບຸຣຸດທັງຫຼາຍ
ແລ້ວທຳການຂວນຂວາຍຈະເພິ່ງຂາດຜົນໄດ້ແນວໃດ

[໔໘] ໄມ້ລຽບຕົ້ນໃດຂຶ້ນຢູ່ເບື້ອງໜ້າຕົ້ນໝາກພັບ
ເຂົາລ້ອມຮົ້ວໄວ້ແລ້ວ
ເປັນທີ່ບູຊາກັນມາກ່ອນ ເປັນຕົ້ນໄມ້ໃຫຍ່
ຂຸມຊັບຝັງໄວ້ທີ່ເຫງົ້າຕົ້ນໄມ້ລຽບນັ້ນບໍ່ມີເຈົ້າຂອງມີຢູ່
ທ່ານຈົ່ງໄປຂຸດເອົາຂຸມຊັບນັ້ນເທີ້ນ

**ປະລາສະຊາດົກທີ ໗ ຈົບ**

# ໗. ຊະວະສະກຸນະຊາດົກ (໓໐໗)
## ວ່າດ້ວຍຣາດຊະສີບໍ່ຮູ້ຄຸນນົກຫົວຂວານ

(ນົກຫົວຂວານໂພທິສັດກ່າວກັບຣາດຊະສີວ່າ)

[໔໙] ພະຍາເນື້ອ ຂ້າພະເຈົ້າຂໍນອບນ້ອມທ່ານ
ຂ້າພະເຈົ້າໄດ້ທຳກິດຢ່າງໜຶ່ງແກ່ທ່ານຕາມກຳລັງທີ່ຕົນມີຢູ່
ຂ້າພະເຈົ້າຈະໄດ້ອັນໃດເປັນເຄື່ອງຕອບແທນແດ່

(ຣາດຊະສີກ່າວວ່າ)

[໕໐] ເຈົ້າຢູ່ໃນປາກຂອງເຮົາຜູ້ມີເລືອດເປັນອາຫານ
ຜູ້ທຳກຳໂຫດຮ້າຍຢູ່ເປັນນິດ
ການລອດຊີວິດໄປໄດ້ກໍນັບວ່າເປັນບຸນໃຫຍ່ຂອງເຈົ້າແລ້ວ

(ນົກຫົວຂວານໂພທິສັດກ່າວວ່າ)

[໕໑] ຜູ້ບໍ່ຮູ້ອຸປະກາຣະຄຸນທີ່ຜູ້ອື່ນເຮັດແລ້ວ
ຜູ້ທີ່ບໍ່ເຄີຍທຳຄວາມດີແນວໃດແນວໜຶ່ງແກ່ໃຜ
ຜູ້ທີ່ບໍ່ຕອບແທນອຸປະກາຣະຄຸນທີ່ຜູ້ອື່ນເຮັດໃຫ້ແລ້ວ
ເປັນເລື້ອງໜ້າຕຳໜິ ຄວາມກະຕັນຍູບໍ່ມີໃນຜູ້ໃດ
ການຄົບຫາຜູ້ນັ້ນກໍຂາດປະໂຫຍດ

[໕໔] ແມ່ນດ້ວຍອຸປະກາຣະຄຸນທີ່ເຮັດຕໍ່ໜ້າ
ມິດທຳຍັງຫາບໍ່ໄດ້ໃນບຸກຄົນໃດ
ບັນດິດບໍ່ຣິດສະຫຍາ ບໍ່ດ່າວ່າບຸກຄົນນັ້ນ
ເພິ່ງຄ່ອຍ ໆ ຫຼີກຫ່າງຈາກເຂົາໄປສາ

**ຊະວະສະກຸນະຊາດົກທີ ໗ ຈົບ**

# ໗. ສະວະຊາດົກ (໓໐໗)
## ວ່າດ້ວຍການນັ່ງຮຽນມົນບໍ່ເໝາະສົມເໝືອນຮຽນກັບສົບ

(ຄົນຈັນທານໂພທິສັດໄປລັກໝາກມ່ວງໃນພຣະຣາດຊະອຸທະຍານ ເຫັນພຣະຣາຊານັ່ງໃນທີ່ສູງ ຮຽນມົນ ປຸໂຣຫິດນັ່ງໃນທີ່ຕ່ຳສອນມົນ ຈຶ່ງລົງຈາກຕົ້ນໝາກມ່ວງມາຕຳໜິ ຖືກພຣະຣາຊາຕັດ ຖາມແລ້ວ ຈຶ່ງຂາບທູນວ່າ)

[໓໓] ກິດທີ່ເຮົາທັງ ໓ ທຳຂຶ້ນນີ້ທັງໝົດບໍ່ຖືກຕ້ອງດ້ວຍທຳ
ເພາະຄົນທັງ ໔ ບໍ່ຮູ້ທຳນຽມ
ຈຶ່ງເຄື່ອນຄາດຈາກທຳນຽມເດີມ
ອາຈານຜູ້ສອນມົນນັ່ງຕ່ຳ
ແລະສິດຜູ້ຮຽນມົນນັ່ງສູງ

(ປຸໂຣຫິດກ່າວວ່າ)

[໓໔] ເຮົາບໍລິໂພກເຂົ້າສາລີສຸກ ສະອາດ ປຸງດ້ວຍເນື້ອ
ເພາະສະນັ້ນ ເຮົາຈຶ່ງບໍ່ປະພຶດທຳ
ທີ່ລືສີທັງຫຼາຍປະພຶດກັນ

(ພຣະໂພທິສັດກ່າວວ່າ)

[໓໕] ທ່ານຈົ່ງຫຼີກໄປ ໂລກນີ້ຍັງກວ້າງໃຫຍ່
ແມ່ນຄົນອື່ນໃນຊົມພູທະວີບກໍຍັງຫຸງເຂົ້າກິນກັນຢູ່
ຍ້ອນເຫດນັ້ນ ຂໍອະທຳທີ່ທ່ານໄດ້ປະພຶດມາແລ້ວ
ຢ່າໄດ້ທຳລາຍທ່ານເໝືອນຫີນທຳລາຍໝໍ້ເລີຍ

[໓໖] ພາມ ໜ້າຕິຕຽນການໄດ້ຍົດ
ແລະການໄດ້ຊັບສຳລັບລ້ຽງຊີວິດ
ເຊິ່ງເປັນເຫດໃຫ້ປະສົບຄວາມພິນາດ
ແລະປະພຶດຜິດທຳ

**ສະວະຊາດົກທີ ໗ ຈົບ**

# ໑໐. ໄສຫະຊາດົກ (໓໑໐)
## ວ່າດ້ວຍໄສຫະອຳມາດ

(ລີສີໂພທິສັດໄດ້ກ່າວກັບໄສຫະອຳມາດວ່າ)

[໓໗] ເຮົາບໍ່ປາຖະໜາແຜ່ນດິນອັນມີມະຫາສະມຸດເປັນຂອບເຂດ
ມີສາຄອນລ້ອມຮອບຄືດັ່ງຕຸ້ມຫູ ພ້ອມກັບຄຳນິນທາ
ທ່ານຈົ່ງຮູ້ຢ່າງນີ້ເທີ້ນ ໄສຫະອຳມາດ

[໓໘] ພາມ ໜ້າຕິຕຽນການໄດ້ຍົດ
ແລະການໄດ້ຊັບສຳລັບລ້ຽງຊີວິດ
ເຊິ່ງເປັນເຫດໃຫ້ປະສົບຄວາມພິນາດ
ຫຼືປະພຶດບໍ່ເປັນທຳ

[໓໙] ເຖິງແມ່ນເຮົາຈະເປັນນັກບວດຖືບາດລ້ຽງຊີບ
ການລ້ຽງຊີບເຊັ່ນນັ້ນແລຍັງດີກວ່າການສະແຫວງຫາໂດຍບໍ່ຊອບທຳ

[໔໐] ເຖິງແມ່ນເຮົາຈະເປັນນັກບວດຖືບາດລ້ຽງຊີບ
ບໍ່ບຽດບຽນຜູ້ອື່ນໃນໂລກ
ການລ້ຽງຊີບເຊັ່ນນັ້ນແລຍັງດີກວ່າການຄອງຣາດຊະສົມບັດ

**ໄສຫະຊາດົກທີ ໑໐ ຈົບ**

**ກາລິງຄະວັກທີ ໑ ຈົບ**

# ລວມຊາດົກທີ່ມີໃນວັກນີ້ ຄື

# ໘. ປຸຈິມັນທະວັກ
## ໝວດວ່າດ້ວຍໄມ້ກະເດົາ

## ໑. ປຸຈິມັນທະຊາດົກ (໓໑໑)
## ວ່າດ້ວຍເທວະດາປະຈຳຕົ້ນກະເດົາ

(ຣຸກຂະເທວະດາໂພທິສັດກ່າວກັບໂຈນວ່າ)

[໔໑] ຈົ່ງລຸກຂຶ້ນເຈົ້າໂຈນ ເອົາແຕ່ນອນຢູ່ເຮັດຫຍັງ
ການນອນຂອງເຈົ້າມີປະໂຫຍດອັນໃດ
ພຣະຣາຊາທັງຫຼາຍຢ່າໄດ້ຈັບເຈົ້າ
ຜູ້ທຳຜິດຢ່າງຮ້າຍແຮງໃນໝູ່ບ້ານເລີຍ

(ເທວະດາປະຈຳຕົ້ນໂພກ່າວວ່າ)

[໔໒] ເຈົ້າໜ້າທີ່ບ້ານເມືອງຈັກຈັບໂຈນ
ຜູ້ທຳຄວາມຜິດຢ່າງຮ້າຍແຮງໃນໝູ່ບ້ານເທົ່ານັ້ນບໍ່ແມ່ນບໍ
ວຽກອັນໃດຂອງປຸຈິມັນທະເທວະດາໃນເລື້ອງນັ້ນນໍ

(ເທວະດາປະຈຳຕົ້ນກະເດົາຕອບວ່າ)

[໔໓] ອັດສັດຖະເທວະດາ ທ່ານບໍ່ຮູ້ເລື້ອງລະຫວ່າງຂ້າພະເຈົ້າກັບໂຈນ
ພຣະຣາຊາທັງຫຼາຍຈັບໂຈນຜູ້ທຳຜິດຢ່າງຮ້າຍແຮງ
ໃນບ້ານໄດ້ແລ້ວສຽບໃສ່ຫຼາວແຫຼມໄມ້ກະເດົາ
ຂ້າພະເຈົ້າມີໃຈຣະແວງໃນເລື້ອງນັ້ນ

(ເທວະດາປະຈຳຕົ້ນໂພກ່າວວ່າ)

[໔໔] ບຸກຄົນເພິ່ງຣະແວງໄພທີ່ຄວນຣະແວງ
ເພິ່ງປ້ອງກັນໄພທີ່ຍັງມາບໍ່ເຖິງ
ເພາະໄພທີ່ຍັງມາບໍ່ເຖິງ
ນັກປາດຈຶ່ງໄດ້ພິຈາລະນາເຫັນໂລກທັງ ໒

**ປຸຈິມັນທະຊາດົກທີ ໑ ຈົບ**

# ໘. ກັດສະປະມັນທິຍະຊາດົກ (໓໑໘)
## ວ່າດ້ວຍລືສີກັດສະປະມັນທິຍະ

(ລືສີໂພທິສັດສອນບິດາວ່າ)

[໔໕] ທ່ານພໍ່ກັດສະປະ ແມ່ນເດັກໜຸ່ມຈະດ່າວ່າແດ່
ທຸບຕີແດ່ ຍ້ອນຍັງເປັນໄວລຸ້ນຢູ່
ບັນດິດຜູ້ສະຫຼາດຍ່ອມອົດທົນ ອົດກັ້ນ
ຄວາມຜິດທັງໝົດນັ້ນທີ່ເດັກໄວລຸ້ນເຮັດໃຫ້

[໔໖] ແມ່ນຖ້າບັນດິດທັງຫຼາຍວິວາທະກັນກໍປະສານກັນໄດ້ໂດຍໄວ
ສ່ວນຄົນພານແຕກກັນເໝືອນພາຊະນະດິນ
ພວກເຂົາຣະງັບເວນກັນບໍ່ໄດ້ເລີຍ

[໔໗] ຄົນທີ່ຮູ້ໂທດທີ່ຕົນລ່ວງເກີນແລ້ວ ແລະຄົນທີ່ຮູ້ຈັກການໃຫ້ອະໄພ
ທັງ ໒ ຄົນນັ້ນຈະສະໝັກສະໝານກັນຍິ່ງຂຶ້ນ
ຄວາມສະໜິດສະໜົມຂອງພວກເຂົາຍ່ອມບໍ່ເສື່ອມຄາຍ

[໔໘] ຜູ້ໃດເມື່ອຊົນເຫຼົ່າອື່ນລ່ວງເກີນກັນ
ເຂົາສາມາດປະສານຊົນເຫຼົ່ານັ້ນໄດ້ດ້ວຍຕົວເອງ
ຜູ້ນັ້ນແລເປັນຜູ້ປະເສີດ
ເປັນຜູ້ນຳພາຣະໄປ ເປັນຜູ້ຊົງທຸຣະໄວ້ໄດ້

**ກັດສະປະມັນທິຍະຊາດົກທີ ໘ ຈົບ**

# ໙. ຂັນຕິວາທີຊາດົກ (໓໑໙)
## ວ່າດ້ວຍຂັນຕິວາທີດາບົດ

(ເສນາບໍດີຂໍຮ້ອງດາບົດໂພທິສັດບໍ່ໃຫ້ໂກດວ່າ)

[໔໙] ທ່ານມະຫາວີຣະ ຜູ້ໃດສັ່ງໃຫ້ຕັດມື ຂາ ໃບຫູ ແລະດັງຂອງທ່ານ
ທ່ານຈົ່ງໂກດຜູ້ນັ້ນເທີ້ນ ຢ່າໃຫ້ແວ່ນແຄວ້ນນີ້ພິນາດໄປເລີຍ

(ດາບົດໂພທິສັດກ່າວວ່າ)

[໕໐] ພຣະຣາຊາພຣະອົງໃດຮັບສັ່ງໃຫ້ຕັດມື
ຂາ ໃບຫູ ແລະດັງຂອງຂ້າພະເຈົ້າ
ຂໍໃຫ້ພຣະຣາຊາພຣະອົງນັ້ນຈົ່ງມີພຣະຊົນມາຍຸຍືນຍາວ
ບັນດິດທັງຫຼາຍເຊັ່ນອາດຕະມາບໍ່ຄຽດດອກ

(ພຣະສາດສະດາໄດ້ຕັດ ໔ ພຣະຄາຖານີ້ວ່າ)

[໕໑] ສະມະນະຜູ້ເຖິງສັນເສີນຂັນຕິມີໃນອະດີດຕະການນານມາແລ້ວ
ພຣະເຈົ້າກາສີໄດ້ຮັບສັ່ງໃຫ້ປະຫານດາບົດຜູ້ດໍາຣົງໝັ້ນໃນຂັນຕິທໍາອົງນັ້ນ

[໕໒] ພຣະເຈົ້າກາສີໄດ້ບຽດສຽດກັນຢູ່ໃນນະຣົກ
ສະເຫວີຍວິບາກອັນເຜັດຮ້ອນແຫ່ງກໍາອັນຫຍາບຊ້ານັ້ນ

**ຂັນຕິວາທິຊາດົກທີ ໓ ຈົບ**

## ໔. ໂລຫະກຸມພີຊາດົກ (໓໑໔)
## ວ່າດ້ວຍສັດໃນໂລຫະກຸມພີນະຣົກ

(ສັດນະຣົກທີ່ກ່າວວ່າ ທຸ ແລ້ວຈົມລົງ ປະສົງຈະກ່າວຢ່າງນີ້ວ່າ)

[໕໓] ພວກເຮົາເມື່ອໂພຄະທັງຫຼາຍມີຢູ່ ບໍ່ໄດ້ໃຫ້ທານ
ບໍ່ໄດ້ເຮັດບ່ອນເພິ່ງໃຫ້ແກ່ຕົນ
ຈຶ່ງຊື່ວ່າມີຊີວິດຢູ່ຢ່າງໄຮ້ປະໂຫຍດ

(ສັດນະຣົກທີ່ກ່າວວ່າ ໂສ ປະສົງຈະກ່າວຢ່າງນີ້ວ່າ)

[໕໔] ພວກເຮົາໄໝ້ຢູ່ໃນນະຣົກທັງໝົດ ໖໐,໐໐໐ ປີບໍລິບູນ
ເມື່ອໃດນໍ ທີ່ສຸດຈະຜາກົດ

(ສັດນະຣົກທີ່ກ່າວວ່າ ນະ ປະສົງຈະກ່າວຢ່າງນີ້ວ່າ)

[໕໕] ເພື່ອນຍາກ ທີ່ສຸດບໍ່ມີ ທີ່ສຸດຈະມີແຕ່ບ່ອນໃດ
ທີ່ສຸດຈັກບໍ່ຜາກົດ ເພາະວ່າໃນການນັ້ນ
ເຮົາແລະທ່ານໄດ້ເຮັດກໍາຊົ່ວໄວ້ຫຼາຍ

(ສັດນະຣົກທີ່ກ່າວວ່າ ໂສ ປະສົງຈະກ່າວຢ່າງນີ້ວ່າ)

[໕໖] ເຮົາໄປຈາກບ່ອນນີ້ແລ້ວໄດ້ເກີດເປັນມະນຸດ
ຈະຮູ້ຄໍາເວົ້າຂອງຜູ້ຂໍ ເຖິງພ້ອມດ້ວຍສີນ ເຮັດກຸສົນໃຫ້ຫຼາຍ

**ໂລຫະກຸມພີຊາດົກທີ ໔ ຈົບ**

## ໕. ມັງສະຊາດົກ (໓໑໕)
## ວ່າດ້ວຍບຸດເສດຖີຂໍຊີ້ນນາຍພານ

(ນາຍພານກ່າວກັບບຸດເສດຖີຄົນທີ ໑ ວ່າ)

[໕໗] ທ່ານເປັນຜູ້ຂໍຊີ້ນ
ຄໍາເວົ້າຂອງທ່ານຫຍາບຄາຍຫຼາຍ
ເຊັ່ນກັບຊີ້ນພັງຜືດ
ນີ້ເພື່ອນ ຂ້າພະເຈົ້າໃຫ້ຊີ້ນພັງຜືດແກ່ທ່ານ

(ນາຍພານກ່າວກັບບຸດເສດຖີຄົນທີ ໒ ວ່າ)

[໕໘] ຄໍາວ່າ ອ້າຍ ນ້ອງຊາຍ ເອື້ອຍ ນ້ອງສາວ
ເປັນເຊັ່ນກັບອະໄວຍະວະຂອງມະນຸດທີ່ເຂົາເວົ້າກັນຢູ່ໃນໂລກ
ຄໍາເວົ້າຂອງທ່ານເປັນຄືກັບອະໄວຍະວະ
ນີ້ເພື່ອນ ຂ້າພະເຈົ້າໃຫ້ຊີ້ນລ້ອນ ໆ ແກ່ທ່ານ

(ນາຍພານກ່າວກັບບຸດເສດຖີຄົນທີ ໓ ວ່າ)

[໕໙] ເມື່ອລູກຮຽກວ່າພໍ່ ໃຈພໍ່ກໍຫວັ່ນໄຫວ
ຄໍາເວົ້າຂອງທ່ານເຊັ່ນກັບຊີ້ນຫົວໃຈ
ນີ້ເພື່ອນ ຂ້າພະເຈົ້າໃຫ້ຊີ້ນຫົວໃຈແກ່ທ່ານ

(ນາຍພານກ່າວກັບບຸດເສດຖີຄົນທີ ໔ ວ່າ)

[໖໐] ໃນບ້ານຂອງຜູ້ໃດບໍ່ມີເພື່ອນ ບ້ານນັ້ນເປັນເຊັ່ນກັບປ່າ
ຄໍາເວົ້າຂອງທ່ານເປັນເໝືອນກັບສົມບັດທັງໝົດ
ນີ້ເພື່ອນ ຂ້າພະເຈົ້າໃຫ້ຊີ້ນທັງໝົດແກ່ທ່ານ

**ມັງສະຊາດົກທີ ໕ ຈົບ**

## ໖. ສະສະປັນທິຕະຊາດົກ (໓໑໖)
## ວ່າດ້ວຍກະຕ່າຍບັນດິດໂພທິສັດ

(ນາກກ່າວກັບທ້າວສັກກະຜູ້ແປງກາຍເປັນພາມມາຂໍອາຫານວ່າ)

[໖໑] ຂ້າພະເຈົ້າມີປາວຽນໄຟຢູ່ ໗ ໂຕ
ເຊິ່ງພານເບັດຕຶກຂຶ້ນມາໄດ້ຈາກນ້ຳວາງໄວ້ເທິງບົກ
ພາມ ຂໍທ່ານຈົ່ງບໍຣິໂພກອາຫານທີ່ຂ້າພະເຈົ້າມີຢູ່ແນວນີ້
ແລ້ວພໍ່າເພັງສະມະນະທຳຢູ່ໃນປ່າເທີ້ນ

(ໝາຈອກກ່າວວ່າ)

[໖໔] ໃນເວລາກາງຄືນ ຂ້າພະເຈົ້າໄດ້ນຳອາຫານຂອງຄົນເຝົ້ານາຄົນນັ້ນມາ
ຄື ຊີ້ນປີ້ງ ໔ ໄມ້ ເຫັຍ ໔ ໂຕ ນົມສົ້ມ ໑ ໝໍ້
ທ່ານພາມ ຂໍທ່ານຈົ່ງບໍຣິໂພກອາຫານທີ່ຂ້າພະເຈົ້າມີຢູ່ນີ້
ແລ້ວພໍ່າເພັງສະມະນະທຳຢູ່ໃນປ່າເທີ້ນ

(ລີງກ່າວວ່າ)

[໖໓] ໝາກມ່ວງສຸກ ນ້ຳເຢັນ ຮົ່ມເງົາທີ່ເຢັນໜ້າອອນຊອນ
ທ່ານພາມ ຂໍທ່ານຈົ່ງບໍຣິໂພກອາຫານທີ່ຂ້າພະເຈົ້າມີຢູ່ນີ້
ແລ້ວພໍ່າເພັງສະມະນະທຳຢູ່ໃນປ່າເທີ້ນ

(ກະຕ່າຍໂພທິສັດບໍ່ມີອາຫານ ເມື່ອຈະສະລະຊີວິດຂອງຕົນ ຈຶ່ງກ່າວວ່າ)

[໖໔] ງາ ຖົ່ວ ແລະເຂົ້າສານຂອງກະຕ່າຍບໍ່ມີ
ຂໍທ່ານຈົ່ງບໍຣິໂພກຂ້າພະເຈົ້າທີ່ສຸກດ້ວຍໄຟນີ້
ແລ້ວພໍ່າເພັງສະມະນະທຳຢູ່ໃນປ່າເທີ້ນ

**ສະສະປັນທິຕະຊາດົກທີ ໖ ຈົບ**

## ໗. ມະຕະໂຣທະນະຊາດົກ (໓໑໗)
## ວ່າດ້ວຍການຮ້ອງໄຫ້ເຖິງຄົນທີ່ຕາຍແລ້ວ

(ເສດຖີໂພທິສັດກ່າວກັບພວກລີງວ່າ)

[໖໕] ພວກທ່ານຮ້ອງໄຫ້ເຖິງຄົນທີ່ຕາຍໄປແລ້ວທໍ່ນັ້ນ
ແຕ່ບໍ່ໄດ້ຮ້ອງໄຫ້ເຖິງຄົນທີ່ຈັກຕາຍເລີຍ
ສັດທັງຫຼາຍທີ່ຍັງມີຮ່າງກາຍຢູ່ຍ່ອມລະຊີວິດໄປໂດຍລໍາດັບ

[໖໖] ເທວະດາ ມະນຸດ ສັດ ໔ ຕີນ ໝູ່ປັກສາ ສັດເລືອຄານ
ແລະສັດທີ່ມີຮ່າງກາຍໃຫຍ່ ບໍ່ເປັນໃຫຍ່ໃນຮ່າງກາຍຂອງຕົນ
ເຖິງຈະອອນຊອນຢູ່ໃນຮ່າງກາຍນັ້ນກໍຕ້ອງລະຊີວິດຂອງຕົນໄປ

[໖໗] ສຸກແລະທຸກທີ່ເພ່ງເລັງກັນຢູ່ໃນໝູ່ມະນຸດ
ມີຄວາມແປຜັນບໍ່ຍັ່ງຍືນແນວນີ້
ຄວາມຮ້ອງໄຫ້ຄໍ່າຄວນເປັນສິ່ງຂາດປະໂຫຍດ
ເປັນຫຍັງທ່ານຈຶ່ງຍັງເສົ້າໂສກຢູ່ນໍ

[໖໘] ນັກເລງກໍດີ ນັກດື່ມກໍດີ ຄົນບໍ່ໄດ້ຮັບການສຶກສາກໍດີ
ຄົນໂງ່ກໍດີ ຄົນດຸຮ້າຍກໍດີ ຄົນບໍ່ມີຄວາມພຽນກໍດີ
ຄົນບໍ່ສະຫຼາດໃນທໍາກໍດີ ຍ່ອມເຂົ້າໃຈນັກປາດວ່າເປັນຄົນໂງ່

**ມະຕະໂຣທະນະຊາດົກທີ ໗ ຈົບ**

## ໘. ກະນະເວຣະຊາດົກ (໓໑໘)
## ວ່າດ້ວຍຍິງຫຼາຍໃຈຣະນຶກເຖິງຄວາມຫຼັງໃຕ້ຕົ້ນຍີ່ໂຖແດງ

(ພວກນັກຟ້ອນໄດ້ຟ້ອນລໍາໄດ້ຂັບເພງຂັບນີ້ວ່າ)

[໖໙] ນາງສາມາ ທີ່ທ່ານສວມກອດໃນເວລາທີ່ຢູ່ໃຕ້ກໍຕົ້ນຍີ່ໂຖແດງ
ຝາກຂ່າວມາບອກທ່ານເຖິງຄວາມທີ່ຕົນສະບາຍດີ

(ໂຈນໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງກ່າວກັບນັກຟ້ອນວ່າ)

[໗໐] ຜູ້ຈະເລີນ ຂ່າວທີ່ວ່າ ລົມພັດພາພູໄປໄດ້ ຂ່າວນີ້ບໍ່ໜ້າເຊື່ອຖື
ຖ້າລົມຈະພັດພາພູໄປໄດ້ ກໍເພິ່ງພັດພາແຜ່ນດິນແມ່ນທັງໝົດໄປໄດ້
ກໍນາງສາມາຕາຍແລ້ວຈະຝາກຂ່າວມາບອກພວກເຮົາ
ເຖິງຄວາມທີ່ຕົນສະບາຍດີໄດ້ແນວໃດ

(ນັກຟ້ອນກ່າວວ່າ)

[໗໑] ນາງສາມາຍັງບໍ່ຕາຍເລີຍ ແລະບໍ່ຕ້ອງການຊາຍອື່ນ ໄດ້ຂ່າວວ່າ
ນາງສາມາກິນອາຫານຄາບດຽວ ຍັງຕ້ອງການແຕ່ທ່ານທໍ່ນັ້ນ

(ໂຈນໂພທິສັດກ່າວວ່າ)

[໗໘] ນາງສາມາໄດ້ປ່ຽນເອົາເຮົາຜູ້ບໍ່ເຄີຍເຊີຍຊິດ
ກັບຊາຍຜູ້ເຄີຍເຊີຍຊິດກັນມານານ
ນາງສາມາຄົງຈະປ່ຽນເອົາຊາຍອື່ນຜູ້ບໍ່ແມ່ນຂາປະຈຳ
ກັບເຮົາຜູ້ເປັນຂາປະຈຳຢ່າງແນ່ນອນ
ເຮົາຈະໄປຈາກບ່ອນນີ້ໃຫ້ໄກແສນໄກ

**ກະນະເວຣະຊາດົກທີ ໗ ຈົບ**

## ໙. ຕິດຕິຣະຊາດົກ (໓໑໙)
## ວ່າດ້ວຍນົກກະທາ

(ນົກກະທາຖາມດາບົດໂພທິສັດວ່າ)

[໗໓] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້າພະເຈົ້າຢູ່ສະບາຍດີ
ແລະໄດ້ບໍຣິໂພກອາຫານຕາມພໍໃຈ ຂ້າພະເຈົ້າກຳລັງຢູ່ໃນອັນຕະລາຍ
ຄະຕິຂອງຂ້າພະເຈົ້າຈະເປັນແນວໃດນໍ

(ດາບົດໂພທິສັດຕອບບັນຫາຂອງນົກກະທາວ່າ)

[໗໔] ປັກສາ ຖ້າໃຈຂອງທ່ານບໍ່ນ້ອມໄປເພື່ອກຳຊົ່ວ
ບາບກໍບໍ່ແປດເປື້ອນທ່ານຜູ້ເປັນຄົນດີ
ບໍ່ຂວນຂວາຍໃນການທຳກຳຊົ່ວດອກ

(ນົກກະທາໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໗໕] ນົກກະທາຈຳນວນຫຼາຍມາດ້ວຍເຂົ້າໃຈວ່າ
ຍາດຂອງພວກເຮົາຈັບຢູ່ບ່ອນນີ້
ຍ່ອມປະສົບເຄາະກຳເພາະອາໄສຂ້າພະເຈົ້າ
ໃຈຂ້າພະເຈົ້າຮັງກຽດໃນກຳຊົ່ວນັ້ນ

(ດາບົດໂພທິສັດຈຶ່ງກ່າວວ່າ)

[໗໖]　　ຖ້າໃຈຂອງທ່ານບໍ່ຖືກກຳຊົ່ວປະທຸດສະຮ້າຍ
ກຳຊົ່ວທີ່ນາຍພານເຮັດເພາະອາໄສທ່ານ ກໍບໍ່ຖືກຕ້ອງທ່ານ
ບາບກໍບໍ່ແປດເປື້ອນທ່ານຜູ້ເປັນຄົນດີ ຜູ້ຂວນຂວາຍພ້ອຍ

**ຕິດຕິຣະຊາດົກທີ ໗ ຈົບ**

## ໑໐. ສຸດຈະຊະຊາດົກ (໓໘໐)
## ວ່າດ້ວຍພຣະຣາຊາບໍ່ຊົງສະລະສິ່ງທີ່ສະລະໄດ້ງ່າຍ

(ພຣະຣາດຊະເທວີຕັດກັບອຳມາດວ່າ)

[໗໗]　　ພຣະຣາຊາເມື່ອບໍ່ພຣະຣາດຊະທານພູດ້ວຍພຽງພຣະວາຈາ
ຊື່ວ່າບໍ່ຊົງສະລະສິ່ງທີ່ຄວນສະລະໄດ້ງ່າຍນໍ
ກໍເມື່ອພຣະອົງບໍ່ຊົງສະລະສິ່ງນັ້ນ ເຮົາຈະເພິ່ງໃຫ້ອັນໃດ
ພຣະຣາຊາບໍ່ພຣະຣາດຊະທານພູດ້ວຍພຣະວາຈາ

(ພຣະຣາຊາຕັດວ່າ)

[໗໘]　　ງານໃດຄວນເຮັດ ເພິ່ງເວົ້າເຖິງແຕ່ງານນັ້ນເທີ້ນ
ງານໃດບໍ່ຄວນເຮັດ ກໍຢ່າເວົ້າເຖິງງານນັ້ນເລີຍ
ຄົນບໍ່ເຮັດ ເອົາແຕ່ເວົ້າ ບັນດິດຍ່ອມຮູ້ທັນ

(ພຣະຣາດຊະເທວີຂາບທູນວ່າ)

[໗໙]　　ຂ້າແດ່ຣາດຊະບຸດ ຂໍຄວາມນອບນ້ອມຈົ່ງມີແດ່ພຣະອົງ
ພຣະອົງດຳຣົງຢູ່ໃນສັດຈະທຳ
ເຖິງແມ່ນຈະຖືກເນຣະເທດ
ກໍຍັງມີພຣະຫະໄທຍິນດີໃນສັດຈະທຳ

(ອຳມາດໂພທິສັດໄດ້ຟັງພຣະເສາວະນີຂອງພຣະເທວີຜູ້ຕັດຄຸນຄວາມດີຂອງພຣະຣາຊາຢູ່ແນວນັ້ນ
ຈຶ່ງປະກາດຄຸນຄວາມດີຂອງພຣະຣາດຊະເທວີວ່າ)

[໘໐]　　ຍິງໃດເປັນພັນລະຍາຂອງສາມີທີ່ຍາກຈົນກໍພອຍຍາກຈົນນຳ
ເມື່ອສາມີລ້ຳລວຍກໍລ້ຳລວຍມີຊື່ສຽງໄປນຳ
ຍິງນັ້ນນັບວ່າເປັນພັນລະຍາສຸດປະເສີດຂອງເຂົາ

ສ່ວນຍິງທີ່ເປັນພັນລະຍາຂອງຊາຍຜູ້ທີ່ມີເງິນຄຳຢູ່ແລ້ວ
ບໍ່ໜ້າອັດສະຈັນເລີຍ

**ສຸດຈະຊະຊາດົກທີ ໑໐ ຈົບ**

**ປຸຈິມັນທະວັກທີ ໘ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ປຸຈິມັນທະຊາດົກ
໒. ຂັນຕິວາທີຊາດົກ
໓. ມັງສະຊາດົກ
໗. ມະຕະໂຣທະນະຊາດົກ
໕. ຕິດຕິຣະຊາດົກ
໖. ກັດສະປະມັນທິຍະຊາດົກ
໘. ໂລຫະກຸມພິຊາດົກ
໙. ສະສະປັນທິຕະຊາດົກ
໙. ກະນະເວຣະຊາດົກ
໑໐. ສຸດຈະຊະຊາດົກ

# ໒. ກຸຕິທູສະກະວັກ

## ໝວດວ່າດ້ວຍການປະທຸດສະຮ້າຍຮັງ

## ໑. ກຸຕິທູສະກະຊາດົກ (໒໘໑)
## ວ່າດ້ວຍລີງປະທຸດສະຮ້າຍຮັງ

(ນົກຂີ້ມິ້ນໂພທິສັດກ່າວກັບລີງວ່າ)

[໗໑] ວານອນ ຫົວ ມື ແລະຕີນຂອງທ່ານເໝືອນຂອງມະນຸດ
ເມື່ອເປັນເຊັ່ນນັ້ນ ຍ້ອນເຫດໃດນໍ ເຮືອນຂອງທ່ານຈຶ່ງບໍ່ມີ

(ລີງໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໗໘] ນົກຂີ້ມິ້ນ ຫົວ ມື ແລະຕີນຂອງເຮົາເໝືອນຂອງມະນຸດກໍຈິງ
ແຕ່ປັນຍາທີ່ບັນດິດສັນເສີນວ່າປະເສີດທີ່ສຸດໃນໝູ່ມະນຸດເຮົາບໍ່ມີ

(ນົກຂີ້ມິ້ນໂພທິສັດກ່າວວ່າ)

[໗໓] ບຸກຄົນຜູ້ມີຈິດບໍ່ໝັ້ນຄົງ ກັບກອກ ປະທຸດສະຮ້າຍມິດ

ມີປົກກະຕິບໍ່ຍັ່ງຍືນຢູ່ເປັນນິດ ຍ່ອມບໍ່ມີຄວາມສຸກ

[໗໔] ນີ້ລີງ ທ່ານຈົ່ງສ້າງອານຸພາບປັນຍາ
ຈົ່ງກັບຕົວໃຫ້ມີຄວາມເປັນປົກກະຕິສາ
ຈົ່ງສ້າງຕູບປ້ອງກັນລົມແລະຄວາມໜາວເຫີ້ນ

**ກຸຕິທູສະກະຊາດົກທີ ໑ ຈົບ**

## ໔. ທຸດທຸພາຍະຊາດົກ (໓໔໔)
## ວ່າດ້ວຍກະຕ່າຍຕື່ນຕູມ

(ກະຕ່າຍກ່າວກັບຣາດຊະສີໂພທິສັດວ່າ)

[໗໕] ຂໍຄວາມຈະເລີນຈົ່ງມີແກ່ທ່ານ
ຂ້າພະເຈົ້າຢູ່ບ່ອນໃດ ບ່ອນນັ້ນມີສຽງດັງສະໜັ່ນ
ແມ່ນຂ້າພະເຈົ້າກໍບໍ່ຮູ້ວ່າ
ສຽງດັງສະໜັ່ນນັ້ນເປັນສຽງອັນໃດ

(ພຣະສາດສະດາຕັດພຣະຄາຖາເຫຼົ່ານີ້ວ່າ)

[໗໖] ກະຕ່າຍໄດ້ຍິນສຽງໝາກຕູມຫຼົ່ນສຽງດັງສະໜັ່ນກໍແລ່ນໜີໄປ
ຝູງສັດຟັງຄຳຂອງກະຕ່າຍກໍຢ້ານຕົວສັ່ນ

[໗໗] ພວກຄົນໂງ່ຈ້າຍັງບໍ່ທັນຮູ້ເລື້ອງແຈ້ງຄັກ
ຟັງຄົນອື່ນໂຈດຂານ ກໍພາກັນຕື່ນຕະໜົກ
ພວກເຂົາເຊື່ອຄົນອື່ນງ່າຍ

[໗໘] ສ່ວນຄົນເຫຼົ່າໃດເປັນນັກປາດ
ພຽບພ້ອມດ້ວຍສີນແລະປັນຍາ
ຍິນດີໃນຄວາມສະງົບ ແລະເວັ້ນໄກຈາກການເຮັດຊົ່ວ
ຄົນເຫຼົ່ານັ້ນບໍ່ເຊື່ອຄົນອື່ນງ່າຍເລີຍ

**ທຸດທຸພາຍະຊາດົກທີ ໔ ຈົບ**

## ๓. ພິມມະທັດຕະຊາດົກ (໓໘໓)
## ວ່າດ້ວຍພຣະເຈົ້າພິມມະທັດ

(ດາບົດໂພທິສັດໄດ້ກ່າວຄາຖາກັບພຣະຣາຊາວ່າ)

[໗໙] ຂໍຖວາຍພຣະພອນມະຫາບໍພິດ ຂຶ້ນຊື່ວ່າຜູ້ຂໍ
ຍ່ອມໄດ້ຜົນ ໒ ຢ່າງ ຄື (໑) ບໍ່ໄດ້ຊັບ (໒) ໄດ້ຊັບ
ຍ້ອນການຂໍມີສະພາບເຊັ່ນນີ້ເປັນທຳມະດາ

[໙໐] ຂ້າແດ່ ພຣະອົງຜູ້ເປັນໃຫຍ່ແຫ່ງແຄວ້ນປັນຈາລະ
ບັນດິດທັງຫຼາຍຮຽກການ ຂໍ ວ່າ ເປັນການຮ້ອງໄຫ້
ຮຽກການປະຕິເສດວ່າ ເປັນການຮ້ອງໄຫ້ຕອບ

[໙໑] ຊາວແຄວ້ນປັນຈາລະຜູ້ມາປະຊຸມພ້ອມພຽງກັນ
ຂໍຢ່າໄດ້ເຫັນອາດຕະມາພາບຮ້ອງໄຫ້ຫຼືເຫັນພຣະອົງຊົງກັນແສງຕອບເລີຍ
ຍ້ອນເຫດນັ້ນ ອາດຕະມາພາບຈຶ່ງປາຖະໜາສະຖານທີ່ລັບ

(ພຣະຣາຊາຕັດພຣະຣາດຊະທານພອນແກ່ດາບົດໂພທິສັດວ່າ)

[໙໒] ທ່ານພາມ ຂ້ານ້ອຍຂໍຖວາຍງົວແດງ ໑,໐໐໐ ໂຕ
ພ້ອມກັບງົວຈ່າຝູງແກ່ທ່ານ
ເພາະພຣະອະຣິຍະໄດ້ຟັງຄາຖາອັນປະກອບດ້ວຍທຳ
ຂອງພຣະຜູ້ເປັນເຈົ້າແລ້ວຈະບໍ່ເພິ່ງຖວາຍແກ່ພຣະອະຣິຍະໄດ້ແນວໃດ

**ພິມມະທັດຕະຊາດົກທີ ໓ ຈົບ**

## ໔. ຈຳມະສາຕະກະຊາດົກ (໓໘໔)
## ວ່າດ້ວຍປະຣິພາຊົກຊື່ຈຳມະສາຕະກະ

(ປະຣິພາຊົກຢືນປະນົມມືຕໍ່ແບ້ແລ້ວກ່າວວ່າ)

[໙໓] ສັດ ໔ ຕີນງົດງາມແທ້ນໍ ທ່າທາງສະງ່າ ແລະໜ້າຮັກໜ້າເອັນດູ
ອ່ອນນ້ອມຕໍ່ພາມຜູ້ພຽບພ້ອມດ້ວຍຊາດແລະມົນ
ຈັກເປັນແບ້ປະເສີດ ມີຍົດສັກ

(ພໍ່ຄ້າບັນດິດໂພທິສັດຫ້າມປະຣິພາຊິກນັ້ນວ່າ)

[໗໔] ນີ້ພາມ ຢ່າໄດ້ວາງໃຈສັດ ໔ ຕີນໂຕນີ້
ດ້ວຍການເຫັນມັນພຽງແຕ່ບຶດດຽວເລີຍ
ມັນຕ້ອງການຈະຊົນທ່ານ ກຳລັງກຽມຕົວທຳທ່າຈະຊົນຢູ່ຈຶ່ງຫຍໍ້ຕົວລົງ

(ພຣະສາດສະດາເມື່ອຈະຊົງປະກາດເຫດນັ້ນ ຈຶ່ງຕັດວ່າ)

[໗໕] ກະດູກຂາອ່ອນຂອງປະຣິພາຊິກກໍຫັກ
ບໍຣິຂານທີ່ຫາບກໍພັດຕົກແລະສຳພາຣະທັງໝົດຂອງພາມກໍແຕກ
ປະຣິພາຊິກປະຄອງແຂນທັງ ໒ ຂ້າງຄ່ຳຄວນຢູ່ວ່າ
ຊ່ອຍແດ່ ແບ້ຂ້າ ຄົນປະພຶດພົມມະຈັນ

(ປະຣິພາຊິກກ່າວວ່າ)

[໗໖] ຜູ້ທີ່ສັນເສີນຄົນເຊິ່ງບໍ່ຄວນບູຊາຈະຖືກທຳຮ້າຍນອນຢູ່
ເໝືອນເຮົາຜູ້ໂງ່ຈ້າຖືກແບ້ຊົນໃນວັນນີ້

**ຈຳມະສາຕະກະຊາດົກທີ ໔ ຈົບ**

## ໕. ໂຄທະຊາດົກ (໓໒໕)

## ວ່າດ້ວຍລືສີຈະກິນເຫ້ຍ

(ພະຍາເຫ້ຍໂພທິສັດເມື່ອສົນທະນາກັບດາບົດ ຈຶ່ງໄດ້ກ່າວວ່າ)

[໗໗] ຂ້າພະເຈົ້າເຂົ້າໃຈທ່ານວ່າເປັນສະມະນະ ຈຶ່ງເຂົ້າໄປຫາທ່ານຜູ້ບໍ່ສັງລວມ
ທ່ານເອົາທ່ອນໄມ້ດຶກໃສ່ຂ້າພະເຈົ້າ ເຮັດເໝືອນບໍ່ແມ່ນສະມະນະ

[໗໘] ນີ້ເຈົ້າຜູ້ໂງ່ຈ້າ ຈະມີປະໂຫຍດອັນໃດແກ່ເຈົ້າ
ດ້ວຍຊະດາແລະການນຸ່ງຫົ່ມໜັງເສືອເຫຼືອງ
ພາຍໃນຂອງເຈົ້າແສນຈະຣົກເຮື້ອ
ເຈົ້າຂັດສີແຕ່ພາຍນອກທໍ່ນັ້ນ

(ດາບົດໄດ້ຟັງດັ່ງນັ້ນ ຈຶ່ງໄດ້ກ່າວວ່າ)

[໗໙] ມາເທີ້ນເຫ້ຍ ເຈົ້າຈົ່ງກັບມາກິນເຂົ້າສາລີສຸກ
ນ້ຳມັນ ເກືອ ແລະດີປີຂອງເຮົາຍັງມີຢູ່ພຽງພໍ

(ພະຍາເຫັຍໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງໄດ້ກ່າວວ່າ)

[໑໐໐] ຂ້າພະເຈົ້າຈະເຂົ້າໄປສູ່ໂພນປວກທີ່ເລີກເຖິງ ໑໐໐ ຊົ່ວຄົນ
ນ້ຳມັນ ເກືອ ແລະດີປີຂອງທ່ານຈະມີປະໂຫຍດອັນໃດ
ສິ່ງເຫຼົ່ານັ້ນບໍ່ມີປະໂຫຍດສຳລັບຂ້າພະເຈົ້າ

**ໂຄທະຊາດົກທີ ៨ ຈົບ**

## ៩. ກັກກາຣຸຊາດົກ (໓໔៩)
## ວ່າດ້ວຍຜູ້ສົມຄວນໄດ້ດອກກັກກາຣຸທິບ

(ຫົວໜ້າເທບພະບຸດອົງທີ ໑ ກ່າວກັບພຣະຣາຊາຜູ້ຂໍດອກໄມ້ທິບວ່າ)

[໑໐໑] ຜູ້ໃດບໍ່ລັກຊັບດ້ວຍກາຍ ບໍ່ເວົ້າຕົວະ
ໄດ້ຍົດແລ້ວກໍບໍ່ມົວເມົາ ຜູ້ນັ້ນແລສົມຄວນໄດ້ດອກກັກກາຣຸທິບ

(ເທບພະບຸດອົງທີ ໒ ກ່າວກັບປຸໂຣຫິດວ່າ)

[໑໐໒] ຜູ້ໃດສະແຫວງຫາຊັບອັນໜ້າພໍໃຈໂດຍຊອບທຳ
ບໍ່ຫຼອກລວງເອົາຊັບເຂົາມາ
ໄດ້ໂພຄະທັງຫຼາຍແລ້ວບໍ່ມົວເມົາ
ຜູ້ນັ້ນແລສົມຄວນໄດ້ດອກກັກກາຣຸທິບ

(ເທບພະບຸດອົງທີ ໓ ກ່າວກັບປຸໂຣຫິດວ່າ)

[໑໐໓] ຜູ້ໃດມີຈິດບໍ່ໜ່າຍໄວ ມີສັດທາຄາຍອອກບໍ່ງ່າຍ
ບໍ່ບໍຣິໂພກໂພຊະນະແຊບພຽງຄົນດຽວ
ຜູ້ນັ້ນແລສົມຄວນໄດ້ດອກກັກກາຣຸທິບ

(ເທບພະບຸດອົງທີ ໔ ກ່າວກັບປຸໂຣຫິດວ່າ)

[໑໐໔] ຜູ້ໃດບໍ່ດ່າວ່າສັດຕະບຸຣຸດຕໍ່ໜ້າຫຼືລັບຫຼັງ
ເວົ້າແນວໃດເຮັດແນວນັ້ນ
ຜູ້ນັ້ນແລສົມຄວນໄດ້ດອກກັກກາຣຸທິບ

**ກັກກາຣຸຊາດົກທີ ៩ ຈົບ**

## ໗. ກາກະອະຕີຊາດົກ (໓໔໗)
## ວ່າດ້ວຍນາງກາກະອະຕີ

(ນະຕະກຸເວຣະຄົນທັນຢືນຢູ່ໃນຣາດຊະສຳນັກ ໄດ້ຂັບຮ້ອງເພງວ່າ)

[໑໐໕] ນາງຜູ້ເປັນທີ່ຮັກຂອງຂ້າພະເຈົ້າຢູ່ບ່ອນໃດ
ກິ່ນກາຍນາງກໍຍັງຫອມຟຸ້ງມາຈາກບ່ອນນັ້ນ
ຂ້າພະເຈົ້າມີໃຈກຳໜັດຍິນດີໃນນາງໃດ
ນາງນັ້ນຊື່ວ່າກາກະອະຕີ ຢູ່ໄກຈາກນີ້

(ພະຍາຄຸດໄດ້ຟັງດັ່ງນັ້ນ ຈຶ່ງຖາມວ່າ)

[໑໐໖] ທ່ານຂ້າມມະຫາສະມຸດໄປໄດ້ແນວໃດ
ຂ້າມແມ່ນ້ຳເກປຸກະໄປໄດ້ແນວໃດ
ຂ້າມມະຫາສະມຸດທັງ ໗ ໄປໄດ້ແນວໃດ
ແລະຂຶ້ນໄປສູ່ວິມານສິມພີໄດ້ແນວໃດ

(ນະຕະກຸເວຣະຄົນທັນຕອບວ່າ)

[໑໐໗] ຂ້າພະເຈົ້າຂ້າມມະຫາສະມຸດໄປໄດ້ຍ້ອນທ່ານ
ຂ້າມແມ່ນ້ຳເກປຸກະໄປໄດ້ຍ້ອນທ່ານ
ຂ້າມມະຫາສະມຸດ ທັງ ໗ ໄປໄດ້ຍ້ອນທ່ານ
ແລະຂຶ້ນໄປສູ່ວິມານສິມພີໄດ້ກໍຍ້ອນທ່ານ

(ພະຍາຄຸດໄດ້ກ່າວວ່າ)

[໑໐໘] ໜ້າຕິຕຽນແທ້ ເຮົາຕົວໃຫຍ່ລ້າ
ແຕ່ບໍ່ມີຄວາມຄິດ
ຍ້ອນເຮົາໄດ້ນຳຊາຍຊູ້ຂອງເມຍຕົວເອງທັງໄປທັງກັບ

**ກາກະອະຕີຊາດົກທີ ໗ ຈົບ**

## ໘. ອະນະນຸໂສຈິຍະຊາດົກ (໓໔໘)
## ວ່າດ້ວຍທຸກຄົນບໍ່ຄວນເສົ້າໂສກ

(ພຣະໂພທິສັດສະແດງທຳແກ່ມະຫາຊົນວ່າ)

[໑໐໙] ຕາປະສິນີຜູ້ຈະເລີນໄປຢູ່ໃນໝູ່ຊົນເປັນຈຳນວນຫຼາຍທີ່ຕາຍແລ້ວ
ນາງຜູ້ຢູ່ຮ່ວມກັບພວກຄົນຕາຍເຫຼົ່ານັ້ນຈະມີປະໂຫຍດອັນໃດແກ່ເຮົາ
ເພາະສະນັ້ນ ຂ້າພະເຈົ້າຈຶ່ງບໍ່ເສົ້າໂສກເຖິງ
ນາງສຳມິນລະທາສິນີຕາປະສິນີຜູ້ເປັນທີ່ຮັກ

[໑໑໐] ຖ້າບຸກຄົນຈະເພິ່ງເສົ້າໂສກເຖິງຄວາມຕາຍທີ່ບໍ່ມີແກ່ສັດຜູ້ເສົ້າໂສກ
ຄວນເສົ້າໂສກເຖິງຕົນຜູ້ຕົກຢູ່ໃນອຳນາດຂອງມັດຈຸຣາດທຸກເມື່ອເທີ້ນ

[໑໑໑] ອາຍຸສັງຂານຈະຕິດຕາມສັດຜູ້ຢືນ ນັ່ງ ນອນ
ແລະຍ່າງໄປມາທີ່ນັ້ນກໍບໍ່ແມ່ນ
ໄວຍ່ອມຕິດຕາມເຫຼົ່າສັດແມ່ນຈົນວ່າມືນຕາແລະຫຼັບຕາ

[໑໑໒] ເມື່ອຄວາມພັດພາກມີຢູ່ຢ່າງບໍ່ຕ້ອງສົງໄສ
ໃນອັດຕະພາບທີ່ເຕັມໄປດ້ວຍອັນຕະລາຍນີ້ແນວນີ້
ບຸກຄົນຄວນອີດູສັດທີ່ຍັງເປັນຢູ່ຍັງເຫຼືອຢູ່
ບໍ່ຄວນເສົ້າໂສກເຖິງສັດທີ່ຕາຍໄປແລ້ວ

**ອະນະນຸໂສຈິຍະຊາດົກທີ ໘ ຈົບ**

## ໙. ກາລະພາຫຸຊາດົກ (໓໒໙)
## ວ່າດ້ວຍລີງຊື່ກາລະພາຫຸ

(ນົກແຂກເຕົ້າໂປດຖະປາທະກ່າວກັບນົກແຂກເຕົ້າຣາທະໂພທິສັດຜູ້ເປັນອ້າຍວ່າ)

[໑໑໓] ເມື່ອກ່ອນ ເຮົາໄດ້ເຂົ້າແລະນ້ຳໃດຈາກຣາດຊະສຳນັກ
ບັດນີ້ ເຂົ້າແລະນ້ຳນັ້ນໄປຫາລີງໆທີ່ນັ້ນ ອ້າຍຣາທະ
ເຮົາກັບໄປປ່າກັນເທີ້ນ ເພາະພຣະເຈົ້າທະນັນໄຊບໍ່ສັກກາຣະເຮົາແລ້ວ

(ນົກຣາທະໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໑໔] ນ້ອງໂປດຖະປາທະເອີຍ ໂລກະທຳໃນໝູ່ມະນຸດເຫຼົ່ານີ້
ຄື ຄວາມມີລາບ ບໍ່ມີລາບ ມີຍົດ ບໍ່ມີຍົດ
ນິນທາ ສັນເສີນ ສຸກ ແລະທຸກ ເປັນຂອງບໍ່ທ່ຽງ
ເຈົ້າຢ່າເສົ້າໂສກໄປເລີຍ ຈະເສົ້າໂສກໄປເຮັດຫຍັງ

(ນົກໂປດຖະປາທະກ່າວວ່າ)

[໑໑໕] ອ້າຍຣາທະ ອ້າຍເປັນບັນດິດແທ້ ໆ ຍ່ອມຮູ້ປະໂຫຍດທີ່ຍັງບໍ່ມາເຖິງ
ເຮັດແນວໃດ ເຮົາຈະເຫັນລີງຊົ່ວຖືກໄລ່ອອກຈາກຣາດຊະຕະກູນ

(ນົກຣາທະໂພທິສັດກ່າວວ່າ)

[໑໑໖] ລີງກາລະພາຫຸກະດິກຫູ ກອກໜ້າ ກອກຕາ
ເຮັດໃຫ້ພຣະຣາດຊະກຸມານຢ້ານຢູ່ເລື້ອຍ ໆ
ມັນຈະເຮັດຕົນເອງໃຫ້ອົດເຂົ້າແລະນ້ຳເອງ

**ກາລະພາຫຸຊາດົກທີ ໙ ຈົບ**

## ໑໐. ສີລະວິມັງສະຊາດົກ (໓໓໐)

## ວ່າດ້ວຍການພິຈາລະນາອານິສົງຂອງສິນ

(ປຸໂຣຫິດໂພທິສັດຢືນຢູ່ໃນທີ່ໃກ້ພຣະຣາຊາ ໄດ້ພັນນາສິນດ້ວຍຄາຖານີ້ວ່າ)

[໑໑໗] ໄດ້ຍິນວ່າ ສິນເປັນສິ່ງດີງາມ ສິນເປັນສິ່ງທີ່ປະເສີດໃນໂລກ
ເບິ່ງເທີ້ນ ນາກທີ່ມີພິດຮ້າຍແຮງຍັງບໍ່ບຽດບຽນໃຜ ໆ
ເພາະສຳນຶກຢູ່ວ່າຕົນມີສິນ

(ພຣະໂພທິສັດເຫັນໂທດຂອງກາມແລ້ວ ຈຶ່ງກ່າວວ່າ)

[໑໑໘] ຕາບໃດ ແຫຼວນັ້ນຍັງຄາບຕ່ອນຊີ້ນຢູ່
ຕາບນັ້ນ ແຫຼວທັງຫຼາຍໃນໂລກກໍຈະພາກັນຫຸ້ມຈິກຕີກັນ
ແຕ່ພວກມັນຈະບໍ່ບຽດບຽນແຫຼວທີ່ບໍ່ມີຄວາມກັງວົນ
[໑໑໙] ຄົນທີ່ບໍ່ມີຄວາມຫວັງຍ່ອມຫຼັບສະບາຍ
ຄວາມຫວັງທີ່ໄດ້ຜົນສົມຫວັງເປັນຄວາມສຸກ
ນາງປິງຄະລາທຳຄວາມຫວັງໃຫ້ສິ້ນແລ້ວຍ່ອມຫຼັບສະບາຍ
[໑໒໐] ຄວາມສຸກອື່ນຍິ່ງກວ່າສະມາທິບໍ່ມີທັງໃນໂລກນີ້ແລະໂລກໜ້າ
ຄົນຜູ້ມີຈິດເປັນສະມາທິຍ່ອມບໍ່ບຽດບຽນທັງຜູ້ອື່ນແລະຕົນເອງ

**ສີລະວິມັງສະຊາດົກທີ ໑໐ ຈົບ**

**ກຸຕິທູສະກະວັກທີ ໓ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ກຸຕິທູສະກະຊາດົກ
໒. ພົມມະທັດຕະຊາດົກ
໓. ໂຄທະຊາດົກ
໔. ກາກະອະຕິຊາດົກ
໕. ກາລະພາຫຸຊາດົກ
໖. ທຸດທຸພາຍະຊາດົກ
໗. ຈຳມະສາຕະກະຊາດົກ
໘. ກັກກາຣຸຊາດົກ
໙. ອະນະນຸໂສຈິຍະຊາດົກ
໑໐. ສີລະວີມັງສະຊາດົກ

# ໔. ໂກກິລະວັກ

## ໝວດວ່າດ້ວຍລູກນົກກາເວົາ

## ໑. ໂກກິລະຊາດົກ (໓໓໑)

## ວ່າດ້ວຍລູກນົກກາເວົາ

(ອຳມາດແກ້ວໂພທິສັດ ໄດ້ຂາບທູນພຣະຣາຊາວ່າ)

[໑໘໑] ຜູ້ໃດເວົ້າເມື່ອຍັງບໍ່ເຖິງເວລາເວົ້າ ກໍເວົ້າເກີນເວລາ
ຜູ້ນັ້ນຈະຖືກກຳຈັດນອນຕາຍຢູ່ ເໝືອນລູກນົກກາເວົາ

[໑໘໒] ທຳມະດາອາວຸດທີ່ລັບຈົນຄົມດີແລ້ວ
ເໝືອນຢາພິດທີ່ມີພິດຮ້າຍແຮງຈະໃຫ້ຕົກໄປໃນທັນທີກໍບໍ່ແມ່ນ
ເໝືອນວາຈາທີ່ເປັນທຸບພາສິດ

[໑໘໓] ເພາະສະນັ້ນ ບັນດິດຄວນຮັກສາວາຈາໄວ້
ທັງໃນເວລາທີ່ຄວນເວົ້າແລະບໍ່ຄວນເວົ້າ
ບໍ່ຄວນເວົ້າໃຫ້ເກີນເວລາແມ່ນໃນບຸກຄົນຜູ້ສະເໝີກັບຕົນ

[໑໘໔] ສ່ວນຜູ້ໃດມີຄວາມຄິດເປັນເບື້ອງໜ້າ ມີປັນຍາເຄື່ອງພິຈາລະນາ
ເຫັນປະຈັກ ເວົ້າພໍສົມຄວນກັບການເວລາ
ຜູ້ນັ້ນຍ່ອມຈັບສັດຕູທັງໝົດໄວ້ໄດ້ຄືດັ່ງນົກຄຸດຈັບນາກໄດ້

**ໂກກິລະຊາດົກທີ ໑ ຈົບ**

## ໒. ຣະຖະລັດຖິຊາດົກ (໓໓໒)

## ວ່າດ້ວຍປຸໂຣຫິດຄຽດປະຫານຜູ້ອື່ນດ້ວຍປະຕັກ

(ອຳມາດຜູ້ພິພາກສາໂພທິສັດ ຂາບທູນພຣະຣາຊາວ່າ)

[໑໘໕] ຂ້າແດ່ມະຫາຣາດ ຄົນບາງຄົນທຳຮ້າຍຕົນເອງ
ແຕ່ກັບເວົ້າວ່າ ຖືກທຳຮ້າຍ
ຕົນເອງຊະນະ ກັບເວົ້າວ່າ ຕົນພ່າຍແພ້
ດັ່ງນັ້ນ ບໍ່ຄວນເຊື່ອຄົນທີ່ເປັນໂຈດຝ່າຍດຽວ

[໑໘໖] ເພາະສະນັ້ນ ບຸກຄົນຜູ້ເປັນຊາດບັນດິດຄວນຟັງຝ່າຍຈຳເລີຍແດ່
ເມື່ອຟັງຄຳຂອງທັງ ໒ ຝ່າຍແລ້ວຄວນຕັດສິນໂດຍທຳ

[໑໘໗] ຄະລືຫັດຜູ້ບໍລິໂພກກາມຂີ້ຄ້ານບໍ່ດີ
ບັນພະຊິດບໍ່ສັງລວມບໍ່ດີ
ພຣະຣາຊາບໍ່ຊົງພິຈາຣະນາກ່ອນແລ້ວເຮັດບໍ່ດີ
ການທີ່ບັນດິດໂກດບໍ່ດີ

[໑໘໘] ຂ້າແດ່ ພຣະອົງຜູ້ເປັນເຈົ້າແຫ່ງທິດ
ກະສັດຊົງພິຈາຣະນາກ່ອນແລ້ວຈຶ່ງຄວນເຮັດ
ບໍ່ຊົງພິຈາຣະນາກ່ອນແລ້ວບໍ່ຄວນຕັດສິນ
ຍົດແລະກຽດຍ່ອມຈະເລີນແດ່ພຣະຣາຊາຜູ້ຊົງພິຈາຣະນາກ່ອນແລ້ວຈຶ່ງເຮັດ

**ຣະຖະລັດຖິຊາດົກທີ ໒ ຈົບ**

## ໓. ໂຄທະຊາດົກ (໓໓໓)
## ວ່າດ້ວຍພຣະຣາຊາຫຼອກກິນເຫ້ຍປີ້ງ

(ພຣະເທວີຕັດກັບພຣະໂພທິສັດວ່າ)

[໑໘໙] ຂ້າແດ່ ພຣະອົງຜູ້ຈອມທັບ
ເມື່ອພຣະອົງຊົງເນັບພຣະຂັນສວມເກາະ
ຊົງພູສາຜ້າເປືອກໄມ້ຢູ່ໃນທ່າມກາງປ່າ
ໃນການນັ້ນ ຂ້ານ້ອຍໄດ້ຮູ້ຈັກພຣະອົງຢ່າງແຈ່ມແຈ້ງ
ເຫ້ຍທີ່ງ່າຕົ້ນອັດສັດຖະໄດ້ໜີໄປແລ້ວ

(ພຣະໂພທິສັດຂາບທູນວ່າ)

[໑໙໐] ບຸກຄົນຄວນນອບນ້ອມແກ່ຜູ້ທີ່ນອບນ້ອມ
ຄວນຄົບຜູ້ທີ່ຄົບດ້ວຍ ຄວນເຮັດກິດແກ່ຜູ້ທີ່ຊ່ອຍເຮັດກິດ

ບໍ່ຄວນເຮັດສິ່ງທີ່ເປັນປະໂຫຍດໃຫ້ແກ່
ຜູ້ປາຖະໜາສິ່ງທີ່ບໍ່ເປັນປະໂຫຍດ
ແລະບໍ່ຄວນຄົບແມ່ນຜູ້ທີ່ບໍ່ປະສົງຈະຄົບດ້ວຍ

[໑໖໑] ຄວນລະຖິ້ມຜູ້ທີ່ລະຖິ້ມ ແລະບໍ່ຄວນມີເຍື່ອໃຍ
ບໍ່ຄວນຄົບກັບຜູ້ມີຈິດໃຈເຫີນຫ່າງ
ຄວນແນມຫາແຕ່ຜູ້ (ທີ່ມີຄວາມເຍື່ອໃຍ)
ເໝືອນ ນົກ ຮູ້ວ່າ ຕົ້ນໄມ້ນີ້ໝົດໜ່ວຍແລ້ວກໍໄປສູ່ຕົ້ນໄມ້ອື່ນ
ເພາະວ່າໂລກກວ້າງໃຫຍ່

(ພຣະຣາຊາຊົງຣະນຶກເຖິງຄຸນຄວາມດີຂອງພຣະເທວີໄດ້ ຈຶ່ງຕັດກັບພຣະເທວີວ່າ)

[໑໖໔] ເຮົານັ້ນ ເປັນກະສັດມຸ້ງຄວາມກະຕັນຍູ (ອຸປະກາຣະຄຸນທີ່ທ່ານເຮັດແລ້ວ)
ຈະກະທຳການຕອບແທນທ່ານຕາມຄວາມສາມາດ
ອັນໜຶ່ງ ເຮົາຈະມອບຄວາມເປັນໃຫຍ່ໃຫ້ແກ່ທ່ານທັງໝົດ
ທ່ານປະສົງສິ່ງໃດ ເຮົາຈະໃຫ້ສິ່ງນັ້ນ

**ໂຄທະຊາດົກທີ ໖ ຈົບ**

## ໔. ຣາໂຊວາທະຊາດົກ (໖໖໔)

## ວ່າດ້ວຍດາບົດຖວາຍໂອວາດແດ່ພຣະຣາຊາ

(ດາບົດໂພທິສັດຂາບທູນພຣະຣາຊາວ່າ)

[໑໖໖] ເມື່ອຝູງງົວຂ້າມນ້ຳໄປ
ຖ້າງົວຈ່າຝູງໄປຄົດຄ້ຽວ
ງົວທັງຝູງກໍໄປຄົດຄ້ຽວນຳກັນ
ໃນເມື່ອງົວຈ່າຝູງໄປ ຄົດຄ້ຽວ

[໑໖໔] ໃນໝູ່ມະນຸດ ກໍຄືກັນ
ຜູ້ໃດໄດ້ຮັບແຕ່ງຕັ້ງໃຫ້ເປັນໃຫຍ່
ຖ້າຜູ້ນັ້ນປະພຶດບໍ່ເປັນທຳ
ປະຊາຊົນຊາວເມືອງນັ້ນກໍຈະປະພຶດບໍ່ເປັນທຳໄປນຳ
ຫາກພຣະຣາຊາບໍ່ຕັ້ງຢູ່ໃນທຳ
ຊາວເມືອງນັ້ນກໍຢູ່ເປັນທຸກ

[໑໓໕] ເມື່ອຝູງງົວຂ້າມນໍ້າໄປ
ຖ້າງົວຈ່າຝູງໄປຊື່
ງົວທັງຝູງກໍໄປຊື່ນໍາກັນ
ໃນເມື່ອງົວຈ່າຝູງໄປຊື່

[໑໓໖] ໃນໝູ່ມະນຸດກໍຄືກັນ
ຜູ້ໃດໄດ້ຮັບແຕ່ງຕັ້ງໃຫ້ເປັນໃຫຍ່
ຖ້າຜູ້ນັ້ນປະພຶດຊອບທໍາ
ປະຊາຊົນຊາວເມືອງນັ້ນກໍຈະປະພຶດຊອບທໍາໄປນໍາ
ຫາກພຣະຣາຊາຕັ້ງຢູ່ໃນທໍາ
ຊາວເມືອງນັ້ນກໍຢູ່ເປັນສຸກ

**ຣາໂຊວາທະຊາດົກທີ ໔ ຈົບ**

## ໕. ຊໍາພຸກະຊາດົກ (໓໓໕)
## ວ່າດ້ວຍໝາຈອກຊໍາພຸກະອວດເກັ່ງ

(ຣາດຊະສີໂພທິສັດສອນໝາຈອກວ່າ)

[໑໓໗] ຊໍາພຸກະ ຊ້າງນັ້ນມີຮ່າງກາຍສູງໃຫຍ່ແລະມີງາຍາວ
ເຈົ້າບໍ່ໄດ້ເກີດໃນຕະກູນຂອງຣາດຊະສີທີ່ສາມາດຈັບຊ້າງໄດ້

(ຣາດຊະສີໂພທິສັດຢືນຢູ່ເທິງຈອມພູ ເຫັນໝາຈອກເຖິງຄວາມພິນາດ ຈຶ່ງກ່າວວ່າ)

[໑໓໘] ສັດໃດບໍ່ແມ່ນຣາດຊະສີ ເຮັດທ່າທາງເໝືອນຣາດຊະສີ
ສັດນັ້ນຈະເປັນເໝືອນໝາຈອກຖືກຊ້າງຢຽບແລ້ວ
ນອນທອດອາໄລຢູ່ເທິງແຜ່ນດິນ

[໑໓໙] ຜູ້ໃດບໍ່ຮູ້ກໍາລັງກາຍ ກໍາລັງປັນຍາ
ແລະກໍາເນີດຂອງບຸກຄົນຜູ້ມີຍົດ ຜູ້ສູງສຸດ
ມີຮ່າງກາຍໃຫຍ່ແລະໝັ້ນຄົງ ມີກໍາລັງຫຼາຍ
ຜູ້ນັ້ນກໍເໝືອນຊໍາພຸກະທີ່ຖືກຊ້າງຂ້ານອນຕາຍຢູ່

[໑໔໐] ສ່ວນຜູ້ໃດໃນໂລກນີ້ຮູ້ກໍາລັງກາຍແລະກໍາລັງປັນຍາໃນຕົນ
ພິຈາລະນາດ້ວຍຄວາມຮູ້ທີ່ໄດ້ຮໍາຮຽນສຶກສາມາ

ແລະດ້ວຍຄຳສຸພາສິດ ປະມານຕົນແລ້ວຈຶ່ງເຮັດວຽກງານ
ຜູ້ນັ້ນຍ່ອມມີໄຊຢ່າງໄພບູນ

**ຈົບພຸກະຊາດົກທີ ໕ ຈົບ**

## ໖. ພະຣະຫາສັດ ຊາດົກ (໑໑໖)
## ວ່າດ້ວຍພຣະກຸມານຊື່ພະຣະຫາສັດ

(ພຣະໂພທິສັດຂາບທູນພຣະຣາຊາໃນເວລາທີ່ຊົງຈົ່ມວ່າ)

[໑໔໑] ພຣະອົງຊົງຈົ່ມຢູ່ວ່າ ຫຍ້າ ຫຍ້າ
ໃຜນໍ ນຳຫຍ້າມາຖວາຍພຣະອົງ
ພຣະອົງມີກິດທີ່ຈະເພິ່ງເຮັດດ້ວຍຫຍ້າບໍ
ຈຶ່ງຕັດແຕ່ຄຳວ່າ ຫຍ້າ ຫຍ້າ ເທົ່ານັ້ນ

(ພຣະຣາຊາຊົງສະດັບດັ່ງນັ້ນ ຈຶ່ງຕັດວ່າ)

[໑໔໒] ສັດຕະລີສີນັ້ນມີຮ່າງກາຍສູງ ເປັນພົມມະຈາຣີ ເປັນພະຫູສູດ
ມາແລ້ວທີ່ນີ້ ລັກເອົາຊັບທັງໝົດຂອງເຮົາໄປ
ໃສ່ຫຍ້າໄວ້ໃນໂອ່ງແທນແລ້ວໜີໄປ

(ພຣະໂພທິສັດຂາບທູນວ່າ)

[໑໔໓] ຜູ້ຕ້ອງການໃຊ້ຫຍ້າມີຄ່າໜ້ອຍແລກຊັບຈຳນວນຫຼາຍ
ຍ່ອມຕ້ອງເຮັດແນວນີ້ ຄື ຖືເອົາຊັບຂອງຕົນ
ແຕ່ບໍ່ຖືເອົາຫຍ້າເຊິ່ງບໍ່ຄວນຖືເອົາ
ການພິໄຣລຳພັນໃນເລື້ອງນັ້ນຈະມີປະໂຫຍດອັນໃດ

(ພຣະຣາຊາຊົງສະດັບດັ່ງນັ້ນ ຈຶ່ງຕັດວ່າ)

[໑໔໔] ຄົນມີສີນບໍ່ເຮັດແນວນັ້ນ
ຄົນພານເຮັດແນວນັ້ນເປັນປົກກະຕິ
ເປັນຫຍັງນໍ ຈະເຮັດຄົນທີ່ມີສີນບໍ່ໝັ້ນຄົງ
ເຊິ່ງເປັນຄົນທຸສີນໃຫ້ເປັນບັນດິດໄດ້

**ພົມສັດຕະຊາດົກທີ ໖ ຈົບ**

## ໗. ປິຖຸະຊາດົກ (໑໑໗)
## ວ່າດ້ວຍເສດຖີຖວາຍຕັ່ງຕາມຕະກູນ

(ເສດຖີເມືອງພາຣານະສີໄດ້ກ່າວກັບດາບົດໂພທິສັດວ່າ)

[໑໔໕] ຂ້າພະເຈົ້າບໍ່ໄດ້ຖວາຍຕັ່ງ ນ້ຳດື່ມ
ແລະໂພຊະນາຫານແດ່ພຣະຜູ້ເປັນເຈົ້າ
ທ່ານຜູ້ປະພຶດພົມມະຈັນ
ຂໍພຣະຜູ້ເປັນເຈົ້າຈົ່ງຍົກໂທດໃຫ້ຂ້າພະເຈົ້າ
ຂ້າພະເຈົ້າເຫັນໂທດນັ້ນຢູ່

(ພຣະດາບົດໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໔໖] ອາດຕະມາບໍ່ໄດ້ຕິດໃຈ ບໍ່ໄດ້ຄຽດ
ແລະບໍ່ໄດ້ມີຄວາມບໍ່ພໍໃຈແມ່ນແຕ່ໜ້ອຍ
ອັນໜຶ່ງ ແມ່ນອາດຕະມາກໍຍັງຄິດຄຳນຶງໃນໃຈຢູ່ວ່າ
ໜ້າທີ່ໃນຕະກູນເປັນແນວນີ້ແນ່ນອນ

(ເສດຖີໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໔໗] ພວກຂ້າພະເຈົ້າຖວາຍອາສະນະ ນ້ຳດື່ມ
ແລະນ້ຳມັນທາຕີນ ທຸກສິ່ງຢູ່ສະເໝີ
ນີ້ເປັນໜ້າທີ່ໃນຕະກູນຄັ້ງປູ່ຍ່າຕາຍາຍຂອງຂ້າພະເຈົ້າ

[໑໔໘] ພວກຂ້າພະເຈົ້າບຳຣຸງສະມະນະແລະພາມໂດຍເຄົາລົບ
ໃນການທຸກເມື່ອເໝືອນຍາດຜູ້ໃຫຍ່
ນີ້ເປັນທຳໃນຕະກູນຄັ້ງບິດາແລະລຸງຂອງຂ້າພະເຈົ້າ

**ປິຖຸະຊາດົກທີ ໗ ຈົບ**

## ໘. ຖຸສະຊາດົກ (໑໑໘)
## ວ່າດ້ວຍໜູບໍ່ກິນແກບ

(ໃນເວລາທີ່ພຣະໂອຣົດມີພຣະຊົນມາຍຸ ໑໖ ພັນສາ ຂະນະທີ່ກຳລັງສະເຫວີຍພຣະກະຍາຫານ
ແລງ ພຣະຣາຊາແຫ່ງເມືອງພາຣານະສີຕັດກັບພຣະໂອຣົດວ່າ)

[໑໔໙] ແກບກໍຜາກົດໂດຍຄວາມເປັນແກບ
ແລະເຂົ້າສານກໍຜາກົດໂດຍຄວາມເປັນເຂົ້າສານແກ່ໝູທັງຫຼາຍ
ແຕ່ພວກໝູເວັ້ນແກບສາແລ້ວຫຍໍ້າກິນສະເພາະເຂົ້າສານທໍ່ນັ້ນ

(ໃນເວລາມີການເຂົ້າເຝົ້າເປັນການໃຫຍ່ ພຣະຣາຊາຕັດວ່າ)

[໑໕໐] ການເປີກສາກັນໃນປ່າກໍດີ ການຊຸ່ມກັນໃນບ້ານກໍດີ
ການວາງແຜນຂ້າເຮົາກໍດີ ທັງໝົດນັ້ນເຮົາຮູ້ແລ້ວ

(ເມື່ອພຣະຣາຊາປະທັບຢືນຢູ່ທີ່ຫົວຂັ້ນໄດ ກໍຕັດວ່າ)

[໑໕໑] ໄດ້ຍິນວ່າ ພໍ່ຂອງລີງກັດລູກອັນທະຂອງລູກລີງ
ທີ່ເກີດຕາມທຳມະຊາດຕັ້ງແຕ່ຍັງນ້ອຍຢູ່

(ພຣະຣາຊາປະທັບຢືນຢູ່ທໍຣະນີປະຕູ ຕັດອີກວ່າ)

[໑໕໒] ການທີ່ເຈົ້າກະສັບກະສ່າຍຢູ່ເໝືອນແບ້ຕາບອດໃນໄຮ່ຜັກກາດ
ແລະເຈົ້ານອນຢູ່ໃຕ້ແທ່ນບັນທົມ ທັງໝົດນັ້ນເຮົາຮູ້ແລ້ວ

**ຖຸສະຊາດົກທີ ໗ ຈົບ**

## ໙. ພາເວຣຸຊາດົກ (໓໓໙)
## ວ່າດ້ວຍຄວາມເສື່ອມລາບຂອງກາໃນແຄວັ້ນພາເວຣຸ

(ພຣະສາດສະດາຊົງປະມວນອະດີດນິທານມາແລ້ວ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ)

[໑໕໓] ຍ້ອນຍັງບໍ່ເຫັນນົກຍູງທີ່ມີຫງອນ ມີສຽງອັນມ່ວນ
ປະຊາຊົນໃນແຄວ້ນພາເວຣຸນັ້ນໄດ້ພາກັນບູຊາກາດ້ວຍຊີ້ນແລະໝາກໄມ້

[໑໕໔] ແຕ່ເມື່ອໃດນົກຍູງທີ່ມີສຽງມ່ວນມາຍັງແຄວ້ນພາເວຣຸ
ເມື່ອນັ້ນລາບແລະສັກກາຣະຂອງກາກໍເສື່ອມຖອຍໄປ

[໑໕໕] ຕາບໃດພຣະພຸດທະເຈົ້າຜູ້ເປັນພຣະທຳຣາຊາ
ຜູ້ເຮັດໂລກໃຫ້ສະຫວ່າງສະໄຫວຍັງບໍ່ໄດ້ອຸບັດຂຶ້ນ ຕາບນັ້ນ
ປະຊາຊົນກໍພາກັນບູຊາສະມະນະແລະພາມເຫຼົ່າອື່ນ

[໑໕໖]	ແຕ່ເມື່ອໃດພຣະພຸດທະເຈົ້າຜູ້ມີພຣະສຸຣະສຽງມ່ວນຊື່ງສະແດງທຳ
ເມື່ອນັ້ນລາບສັກກາຣະຂອງພວກເດຍຣະຖີກໍເສື່ອມໄປ

**ພາເວຣຸຊາດົກທີ ໗ ຈົບ**

## ໑໐. ວິໄສຫະຊາດົກ (໓໔໐)
## ວ່າດ້ວຍວິໄສຫະເສດຖີ

(ທ້າວສັກກະສະເດັດມາຢືນຢູ່ໃນອາກາດ ໄດ້ຕັດກັບວິໄສຫະເສດຖີໂພທິສັດວ່າ)

[໑໕໗]	ທ່ານວິໄສຫະເສດຖີ ເມື່ອກ່ອນທ່ານໄດ້ໃຫ້ທານ
ກໍເມື່ອທ່ານໃຫ້ທານຢູ່ແນວນັ້ນ ໂພຄະທັງຫຼາຍຂອງທ່ານ
ກໍສິ້ນໄປເປັນທຳມະດາ ຕັ້ງແຕ່ນີ້ໄປ ຖ້າທ່ານຈະບໍ່ເພິ່ງໃຫ້ທານ
ໂພຄະທັງຫຼາຍຂອງທ່ານຜູ້ງົດໃຫ້ທານກໍຈະເພິ່ງດຳຣົງຢູ່

(ວິໄສຫະເສດຖີໂພທິສັດໄດ້ຟັງແລ້ວ ຈຶ່ງກ່າວວ່າ)

[໑໕໘]	ທ້າວສະຫັດສະເນດ ພຣະອະຣິຍະທັງຫຼາຍກ່າວອະນາຣະຍະທຳວ່າ
ເປັນກິດທີ່ອະຣິຍະຊົນຫຼືແມ່ນຄົນຍາກຈົນບໍ່ຄວນເຮັດ
ທ່ານຈອມຊົນ ເຮົາເພິ່ງສະຫຼະສັດທາຍ້ອນເຫດແຫ່ງການບໍຣິໂພກຊັບໃດ
ຂໍຊັບນັ້ນຢ່າເພິ່ງເກີດແກ່ເຮົາເລີຍ

[໑໕໙]	ລົດຄັນໜຶ່ງແລ່ນໄປທາງໃດ
ລົດຄັນອື່ນກໍຈະແລ່ນໄປທາງນັ້ນ
ທ້າວວາສະວະ ທຳນຽມທີ່ໄດ້ປະພຶດປະຕິບັດມາແຕ່ກ່ອນ
ຂໍຈົ່ງດຳເນີນຕໍ່ໄປເທີ້ນ

[໑໖໐]	ຖ້າຍັງມີຍັງເປັນຢູ່ກໍຈະໃຫ້ເລື້ອຍໄປ
ເມື່ອບໍ່ມີຊີວິດຈະໃຫ້ແນວໃດໄດ້
ຂ້າພະເຈົ້າແມ່ນມີສະພາບແນວນີ້ ກໍຍັງຈະໃຫ້
ຂ້າພະເຈົ້າຈະບໍ່ລືມການໃຫ້ເລີຍ

**ວິໄສຫະຊາດົກທີ ໑໐ ຈົບ**

**ໂກກິລະວັກທີ ໔ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ໂກກິລະຊາດົກ
໒. ໂຄທະຊາດົກ
໓. ຊຳພຸກະຊາດົກ
໗. ປີຖະຊາດົກ
໙. ພາເວຣຸຊາດົກ
໔. ຣະຖະລັດຖິຊາດົກ
໕. ຣາໂຊວາທະຊາດົກ
໖. ພົມສັດຕະຊາດົກ
໘. ຖຸສະຊາດົກ
໑໐. ວິໄສທະຊາດົກ

# ໕. ຈູລະກຸນາລະວັກ

## ໝວດວ່າດ້ວຍນົກກຸນາລະໝວດສັ້ນ

## ໑. ກັນທະຣີຊາດົກ (໓໔໑)

### ວ່າດ້ວຍກັນທະຣີຣາຊາ

(ໃນເລື້ອງທີ່ພະຍານົກກຸນາລະເວົ້າກັບນົກປຸນນະມຸຂະນີ້ ມີຄາຖາປະພັນໄວ້ອີກສ່ວນ ໜຶ່ງວ່າ)

[໑໒໑] ບັນດາພວກຜູ້ຍິງທີ່ທຳຄວາມຮື່ນຣົມໃຫ້ແກ່ພວກຜູ້ຊາຍ
ເປັນຄົນຫຼາຍໃຈ ບໍ່ມີໃຜຈະບັງຄັບໄດ້
ແມ່ນຖ້າວ່າພວກນາງຈະເພິ່ງເຮັດໃຫ້ເກີດຄວາມພໍໃຈໃນທີ່ທັງປວງ
ກໍບໍ່ຄວນໄວ້ໃຈ ເພາະວ່າພວກຜູ້ຍິງປຽບເໝືອນທ່ານ້ຳ

(ພະຍານົກກຸນາລະເກີດເປັນປັນຈາລະຈັນທະປຸໂຣຫິດ ນຳເຫດທີ່ຕົນໄດ້ເຫັນມາສະແດງວ່າ)

[໑໒໔] ບັນດິດເຫັນເຫດຄາຍຄວາມກຳໜັດຂອງພະຍາກິນນະຣະ
ແລະພະຍາກິນນະຣີແລ້ວ ເພິ່ງຮູ້ເທີ້ນວ່າ
ຜູ້ຍິງທັງປວງບໍ່ຍິນດີໃນເຮືອນຂອງສາມີ
ເໝືອນພັນລະຍາໄດ້ປະຖິ້ມສາມີຄູ່ຊີວິດເຊັ່ນນັ້ນໄປ
ຍ້ອນພົບຊາຍອື່ນແມ່ນເປັນຄົນງ່ອຍເປ້ຍ

(ພະຍານົກກັນທະຣີເກີດເປັນພຣະເຈົ້າພົມມະທັດ ເມື່ອຈະສະແດງເລື້ອງທີ່ຕົນໄດ້ຮູ້ມາແລ້ວ ຈຶ່ງກ່າວວ່າ)

[໑໒໓] ພຣະມະເຫສີຂອງພຣະເຈົ້າພະກະແລະພຣະເຈົ້າພາວະຣີ
ຜູ້ມີກາມຸ່ນຢູ່ໃນກາມຫຼາຍເກີນໄປ

ໄດ້ເປັນຊູ້ກັບມະຫາດນ້ອຍຄົນສະນິດຂອງພຣະນາງ
ມີບໍຜູ້ຍິງທັງຫຼາຍຈະບໍ່ເພິ່ງເປັນຊູ້ກັບຊາຍອື່ນ

(ພະຍານິກາກັນທະຣີເກີດເປັນພຣະເຈົ້າພົມມະທັດ ເມື່ອຈະສະແດງເລື້ອງທີ່ຕົນເຫັນມາເອງ ຈຶ່ງກ່າວວ່າ)

[໑໗໔] ພຣະນາງປິງຄິຍານີ ອັກຄະຣະມະເຫສີຜູ້ເປັນທີ່ຮັກ
ຂອງພຣະເຈົ້າພົມມະທັດຜູ້ເປັນໃຫຍ່ແຫ່ງໂລກທັງມວນ
ໄດ້ເປັນຊູ້ກັບຄົນລ້ຽງມ້າຜູ້ໃກ້ຊິດພຣະນາງ
ພຣະນາງເປັນຜູ້ມັກຫຼາຍໃນກາມ ບໍ່ໄດ້ປະສົບຜົນແມ່ນທັງ ໔ ຢ່າງ

**ກັນທະຣີຊາດົກທີ ໑ ຈົບ**

## ໔. ວານະຣະຊາດົກ (໓໔໔)

### ວ່າດ້ວຍວານອນໂພທິສັດ

(ວານອນໂພທິສັດໄດ້ກ່າວກັບແຂ້ວ່າ)

[໑໗໕] ຂ້າພະເຈົ້າສາມາດຂຶ້ນຈາກນ້ຳມາເທິງບົກໄດ້
ແຂ້ ບັດນີ້ຂ້າພະເຈົ້າບໍ່ຕົກຢູ່ໃນອຳນາດຂອງທ່ານອີກຕໍ່ໄປ
[໑໗໖] ພໍກັນທີສຳລັບໝາກມ່ວງ ໝາກຫວ້າ ແລະໝາກມີ້
ທີ່ຕ້ອງຂ້າມຝັ່ງມະຫາສະມຸດໄປກິນ ໝາກເດື່ອຂອງເຮົາດີກວ່າ
[໑໗໗] ອັນໜຶ່ງ ຜູ້ໃດບໍ່ຮູ້ເທົ່າທັນເຫດທີ່ເກີດຂຶ້ນໂດຍທັນທີ
ຜູ້ນັ້ນຈະຕົກຢູ່ໃນອຳນາດຂອງສັດຕູແລະຈະເດືອດຮ້ອນໃນພາຍຫຼັງ
[໑໗໘] ສ່ວນຜູ້ໃດຮູ້ເທົ່າທັນເຫດທີ່ເກີດຂຶ້ນໂດຍທັນທີ
ຜູ້ນັ້ນຍ່ອມພົ້ນຈາກຄວາມຄັບຂັນອັນເກີດຈາກສັດຕູ
ແລະຈະບໍ່ເດືອດຮ້ອນໃນພາຍຫຼັງ

**ວານະຣະຊາດົກທີ ໔ ຈົບ**

## ໓. ກຸນຕິນີຊາດົກ (໓໔໓)

### ວ່າດ້ວຍນາງນົກກະຽນ

(ນາງນົກກະຽນຂາບທູນພຣະຣາຊາໂພທິສັດວ່າ)

[໑໖໙] ຂ້າພຣະອົງໄດ້ອາໄສຢູ່ໃນພຣະຣາດຊະນິເວດຂອງພຣະອົງ
ໄດ້ຮັບສັກກາຣະຢູ່ເນືອງນິດ
ບັດນີ້ ພຣະອົງໄດ້ຊົງກໍ່ເຫດແຫ່ງຄວາມເສຍໃຈໃຫ້ແກ່ຂ້າພຣະອົງ
ຂ້າແດ່ມະຫາຣາດ ເອົາເທີ້ນ ຂ້າພຣະອົງຈະລາໄປສູ່ປ່າຫິມະພານ

(ພຣະຣາຊາໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງຕັດວ່າ)

[໑໗໐] ຜູ້ໃດຮູ້ກຳຊົ່ວຮ້າຍທີ່ຄົນອື່ນເຮັດແກ່ຕົນ
ແລະຮູ້ກຳຊົ່ວຮ້າຍທີ່ຕົນເຮັດຕອບແກ່ເຂົາ
ເວນຂອງຜູ້ນັ້ນຍ່ອມຣະງັບໄປດ້ວຍເຫດພຽງເທົ່ານີ້
ນາງນົກກະຣຽນ ເພາະສະນັ້ນ ທ່ານຈົ່ງຢູ່ເທີ້ນ ຢ່າໄປເລີຍ

(ນາງນົກກະຣຽນໄດ້ຟັງດັ່ງນັ້ນ ຈຶ່ງຂາບທູນວ່າ)

[໑໗໑] ມິດຕະພາບຂອງຜູ້ປະທຸດສະຮ້າຍແລະຂອງຜູ້ຖືກປະທຸດສະຮ້າຍ
ຍ່ອມສະມານກັນບໍ່ໄດ້ອີກ ໃຈບໍ່ອະນຸຍາດໃຫ້ຢູ່
ຂ້າແດ່ ພຣະອົງຜູ້ເປັນຈອມທັບ ຂ້າພຣະອົງຈັກໄປ

(ພຣະຣາຊາໂພທິສັດຕັດວ່າ)

[໑໗໘] ມິດຕະພາບຂອງຜູ້ປະທຸດສະຮ້າຍແລະຂອງຜູ້ຖືກປະທຸດສະຮ້າຍ
ພວກທີ່ເປັນນັກປາດຍ່ອມສະມານກັນໄດ້ອີກ
ແຕ່ພວກທີ່ໂງ່ຈ້າຍ່ອມສະມານກັນບໍ່ໄດ້
ນາງນົກກະຣຽນ ທ່ານຈົ່ງຢູ່ເທີ້ນ ຢ່າໄປເລີຍ

**ກຸນຕິນີຊາດົກທີ ໓ ຈົບ**

## ໔. ອຳພະຊາດົກ (໓໔໔)
## ວ່າດ້ວຍພຣະຜູ້ເຖົ້າເຝົ້າສວນໝາກມ່ວງ

(ລູກສາວເສດຖີຄົນທີ ໑ ກ່າວຄຳສາບານແກ່ຊະດິນໂກງວ່າ)

[໑໗໓] ຍິງໃດໄດ້ລັກໝາກມ່ວງທັງຫຼາຍຂອງທ່ານໄປ
ຂໍຍິງນັ້ນຈົ່ງຕົກຢູ່ໃນອຳນາດຂອງຊາຍທີ່ຍ້ອມຜົມໃຫ້ດຳ
ແລະລຳບາກດ້ວຍການໃຊ້ແໜບ (ລົກຜົມຫງອກທີ່ປົ່ງແຊມຂຶ້ນມາ)

(ລູກສາວເສດຖີຄົນທີ ໔ ກ່າວຄຳສາບານແກ່ຊະດົນຂີ້ໂກງວ່າ)

[໑໓໔] ຍິງໃດໄດ້ລັກໝາກມ່ວງທັງຫຼາຍຂອງທ່ານໄປ
ຍິງນັ້ນເຖິງຈະມີອາຍຸຕັ້ງ ໘໐ ປີ ໘໕ ປີ
ຫຼືຍັງບໍ່ເຖິງ ໒໐ ປີ ກໍຂໍຢ່າໄດ້ຫາຜົວໄດ້ເລີຍ

(ຕໍ່ຈາກນັ້ນ ລູກສາວເສດຖີຄົນທີ ໖ ກ່າວຄຳສາບານວ່າ)

[໑໓໕] ຍິງໃດໄດ້ລັກໝາກມ່ວງທັງຫຼາຍຂອງທ່ານໄປ
ຂໍຍິງນັ້ນເຖິງຈະກະເສືອກກະສົນເດີນທາງອັນຍາວໄກພຽງຄົນດຽວ
ກໍຢ່າໄດ້ພົບຜົວແມ່ນໃນສະຖານທີ່ທີ່ໄດ້ນັດໝາຍກັນໄວ້ເລີຍ

(ຕໍ່ຈາກນັ້ນ ລູກສາວເສດຖີຄົນທີ ໔ ຈຶ່ງກ່າວຄຳສາບານແດ່ວ່າ)

[໑໓໖] ຍິງໃດໄດ້ລັກໝາກມ່ວງທັງຫຼາຍຂອງທ່ານໄປ
ຂໍຍິງນັ້ນເຖິງຈະມີບ່ອນຢູ່ອັນສະອາດ ຕົກແຕ່ງຮ່າງກາຍສວຍງາມ
ປະດັບປະດາດ້ວຍພວງດອກໄມ້ ລູບໄລ້ດ້ວຍກະແຈະຈັນ
ກໍຈົ່ງນອນຢູ່ເທິງບ່ອນນອນພຽງຄົນດຽວເທີ້ນ

**ອຳພະຊາດົກທີ ໔ ຈົບ**

## ໕. ຄະຊະກຸມພະຊາດົກ (໒໔໕)
## ວ່າດ້ວຍສັດເລືອຄານຊື່ຄະຊະກຸມພະ

(ອຳມາດແກ້ວໂພທິສັດກ່າວກັບຕົວຄະຊະກຸມພະວ່າ)

[໑໓໗] ເຈົ້າຕົວໂຍກເຍກ ເຈົ້າມີຄວາມເຊື່ອງຊ້າແນວນີ້
ເວລາເມື່ອໄຟປ່າໄໝ້ປ່າ ເຈົ້າຈະເຮັດແນວໃດ

(ຕົວຄະຊະກຸມພະໄດ້ຟັງດັ່ງນັ້ນ ຈຶ່ງຕອບວ່າ)

[໑໓໘] ໂພ້ງໄມ້ແລະຮອຍແຕກລະແຫງຂອງແຜ່ນດິນມີຢູ່ເປັນຈຳນວນຫຼາຍ
ຖ້າພວກຂ້າພະເຈົ້າໜີເຂົ້າໄປບໍ່ທັນ ພວກຂ້າພະເຈົ້າກໍຕາຍ

(ອຳມາດໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໘໙] ຜູ້ໃດໃນເວລາທີ່ຄວນເຮັດຊ້າ ໆ ກັບເຮັດວຽກຢ່າງໄວ
ໃນເວລາທີ່ຄວນເຮັດຢ່າງຮີບຟ້າວ ກັບເຮັດຢ່າງເຊື່ອງຊ້າ
ຜູ້ນັ້ນຍ່ອມຫັກຫານປະໂຫຍດຂອງຕົນເອງ
ເໝືອນຄົນແຂງແຮງຢຽບໃບຕານແຫ້ງ

[໑໙໐] ຜູ້ໃດໃນເວລາທີ່ຄວນເຮັດຊ້າ ໆ ກໍຄ່ອຍ ໆ ເຮັດວຽກຢ່າງຊ້າ ໆ
ໃນເວລາທີ່ຄວນເຮັດໄວ ກໍຮີບເຮັດຢ່າງໄວ
ປະໂຫຍດຂອງຜູ້ນັ້ນກໍບໍລິບູນ
ເໝືອນດວງຈັນກຳຈັດຄວາມມືດ ເຮັດໃຫ້ຣາຕີສະຫວ່າງຢູ່

**ຄະຊະກຸມພະຊາດົກທີ ໕ ຈົບ**

## ໖. ເກສະວະຊາດົກ (໓໔໖)
## ວ່າດ້ວຍເກສະວະດາບົດ

(ນາຣະທະອຳມາດກ່າວກັບເກສະວະດາບົດວ່າ)

[໑໙໑] ເປັນຫຍັງນໍ ເກສະວະດາບົດຜູ້ມີໂຊກ
ຈຶ່ງໄດ້ປະພຣະເຈົ້າເມືອງພາຣານະສີ
ຜູ້ເປັນຈອມມະນຸດ
ຜູ້ຫຍັງຄວາມປະສົງທັງປວງໃຫ້ສຳເລັດໄດ້
ກັບມາຍິນດີຢູ່ໃນອາສົມຂອງກັບປະດາບົດ

(ເກສະວະດາບົດກ່າວວ່າ)

[໑໙໒] ທ່ານນາຣະທະອຳມາດ ສະຖານທີ່ອັນໜ້າອອນຊອນ
ເຊິ່ງໃຫ້ສຳເລັດປະໂຫຍດໄດ້ມີຢູ່
ໝູ່ໄມ້ອັນໜ້າອອນຊອນໃຈກໍມີຢູ່
ແຕ່ຄຳເວົ້າອັນເປັນສຸພາສິດຂອງກັບປະດາບົດ
ຍ່ອມເຮັດໃຫ້ເຮົາອອນຊອນຍິນດີ

(ນາຣະທະອຳມາດກ່າວວ່າ)

[໑໙໓] ພຣະຜູ້ເປັນເຈົ້າບໍຣິໂພກເຂົ້າສາລີສຸກ ສະອາດ ປຸງດ້ວຍຊີ້ນ
ເຫດໃດເຂົ້າຟ່າງແລະໝາກເດືອຍອັນຫາຣົດຊາດບໍ່ໄດ້

ຈຶ່ງເຮັດໃຫ້ພຣະຜູ້ເປັນເຈົ້າພໍໃຈ

(ເກສະວະດາບົດກ່າວວ່າ)

[໑໗໔] ໂພຊະນະຈະດີຫຼືບໍ່ດີ ຈະໜ້ອຍຫຼືຫຼາຍກໍຕາມ
ບຸກຄົນຜູ້ມີຄວາມຄຸ້ນເຄີຍກັນບໍຣິໂພກໃນບ່ອນໃດ
ໂພຊະນະທີ່ບໍຣິໂພກແລ້ວໃນບ່ອນນັ້ນ ເປັນຂອງດີທັງໝົດ
ຍ້ອນຣົດທັງຫຼາຍມີຄວາມຄຸ້ນເຄີຍເປັນຢ່າງຍິ່ງ

**ເກສະວະຊາດົກທີ ໙ ຈົບ**

## ກ. ອະຍະກູຕະຊາດົກ (໓໔໗)
## ວ່າດ້ວຍຍັກຖືເນີນເຫຼັກໃຫຍ່

(ພຣະຣາຊາໂພທິສັດຕັດກັບຍັກວ່າ)

[໑໗໕] ວັນນີ້ທ່ານທີ່ຖືພະເນີນເຫຼັກລ້ວນ ໆ ໃຫຍ່ເຫຼືອປະມານ
ຢືນຢູ່ກາງອາກາດ ຖືກເຂົາແຕ່ງຕັ້ງມາເພື່ອຄຸ້ມຄອງຮັກສາຂ້າພະເຈົ້າ
ຫຼືວ່າພະຍາຍາມຈະຂ້າຂ້າພະເຈົ້າ

(ຍັກຟັງຄຳຂອງພຣະຣາຊາໂພທິສັດແລ້ວ ຈຶ່ງຂາບທູນວ່າ)

[໑໗໖] ຂ້າແດ່ ມະຫາຣາດ ຂ້າພຣະອົງເປັນທູດຖືກພວກຣາກສົດສົ່ງມາບ່ອນນີ້
ເພື່ອປົງພະຊົນພຣະອົງ
ແຕ່ວ່າພຣະອິນທະເທວະຣາດຄຸມຄອງພຣະອົງຢູ່
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງຜ່າພຣະສຽນຂອງພຣະອົງບໍ່ໄດ້

(ພຣະຣາຊາໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງຕັດ ໔ ຄາຖາວ່າ)

[໑໗໗] ກໍຖ້າທ້າວມັກຄະວານເທວະຣາດຜູ້ເປັນຈອມແຫ່ງເທບ
ພຣະສະວາມີຂອງພຣະນາງສຸຊາດາຄຸ້ມຄອງຮັກສາຂ້າພະເຈົ້າຢູ່
ພວກຜີສາດທັງປວງຈົ່ງແຜດສຽງຄຳຣາມໄປເທີ້ນ
ຂ້າພະເຈົ້າບໍ່ສະດຸ້ງຢ້ານພວກຣາກສົດດອກ

[໑໗໗] ພວກກຸມພັນແລະພວກຜີສາດໃນກອງມູນຝອຍທັງປວງ
ຈົ່ງຄ່ຳຄວນໄປເທີ້ນ

ຜີສາດທັງຫຼາຍບໍ່ສາມາດຈະຮົບກັບຂ້າພະເຈົ້າໄດ້
ທ່າທາງທີ່ເຮັດໃຫ້ເປັນຕາຢ້ານນັ້ນມີຢູ່ຫຼວງຫຼາຍ

**ອະຍະກູຕະຊາດົກທີ ໗ ຈົບ**

## ໗. ອະຣັນຍະຊາດົກ (໓໔໗)
## ວ່າດ້ວຍວັດຂອງຜູ້ອອກຈາກປ່າ

(ດາບົດໜຸ່ມກ່າວກັບດາບົດຜູ້ເປັນບິດາວ່າ)

[໑໗໙] ທ່ານພໍ່ ລູກອອກຈາກປ່າໄປສູ່ບ້ານແລ້ວ
ຄວນຈະຄົບຄົນມີສິນແນວໃດ ມີຂໍ້ປະຕິບັດແນວໃດ
ລູກຖາມແລ້ວ ຂໍພໍ່ຈົ່ງບອກຂໍ້ນັ້ນ

(ດາບົດຜູ້ເປັນບິດາຕອບວ່າ)

[໑໘໐] ລູກຮັກ ຜູ້ໃດເພິ່ງເຮັດໃຫ້ລູກເບົາໃຈ
ອົດທົນຄວາມຄຸ້ນເຄີຍຂອງລູກໄດ້
ເຊື່ອຟັງແລະອົດກັ້ນຄຳເວົ້າຂອງລູກໄດ້
ລູກໄປຈາກບ່ອນນີ້ແລ້ວ ຈົ່ງຄົບຜູ້ນັ້ນ

[໑໘໑] ຜູ້ໃດບໍ່ທຳຄວາມຊົ່ວທາງກາຍ ວາຈາ ໃຈ
ລູກໄປຈາກບ່ອນນີ້ແລ້ວ ຈົ່ງດຳຣົງຕົນຢູ່ເໝືອນລູກໃນໄສ້ຄົບຜູ້ນັ້ນເທີ້ນ

[໑໘໒] ຄົນທີ່ມີຈິດກັບກອກເໝືອນລີງ
ຮັກງ່າຍໜ່າຍໄວຄືຜ້າທີ່ຍ້ອມດ້ວຍຂີ້ມີ້ນ
ລູກຮັກ ເຖິງແມ່ນວ່າພື້ນຊົມພູທະວີບທັງໝົດຈະຂາດມະນຸດ
ລູກກໍຢ່າຄົບຄົນເຊັ່ນນັ້ນເລີຍ

**ອະຣັນຍະຊາດົກທີ ໗ ຈົບ**

## ໘. ສັນທິເພທະຊາດົກ (໓໔໘)
## ວ່າດ້ວຍການທຳລາຍມິດໄມຕີ

(ພຣະຣາຊາໂພທິສັດຕັດກັບນາຍສາຣະຖີວ່າ)

[໑໙໓] ນາຍສາຣະຖີ ສັດຕົວເມຍທັງ ໔ ຕົວບໍ່ຄືກັນ
ແລະອາຫານກໍບໍ່ຄືກັນ
ຕໍ່ມາພາຍຫຼັງ ເຈົ້າໝາຈອກຊົ່ວນີ້ຍຸໃຫ້ແຕກສາມັກຄີກັນ
ເບິ່ງເທີ້ນ ເລື້ອງທີ່ເຮົາຄິດຖືກຕ້ອງພຽງໃດ

[໑໙໔] ຝູງໝາຈອກພາກັນກິນງົວອຸສະພະ
ແລະຣາດຊະສີ ຍ້ອນຄຳສໍ່ສຽດໃດ
ຄຳສໍ່ສຽດນັ້ນ ຈຶ່ງເປັນໄປເຖິງຕັດມິດໄມຕີ
ຍ້ອນຊີ້ນເປັນເຫດ ເໝືອນດາບອັນຄົມ

[໑໙໕] ນາຍສາຣະຖີ ເຈົ້າເຫັນການນອນຕາຍຂອງສັດທັງ ໔ ຕົວນີ້ບໍ
ຜູ້ໃດເຊື່ອຖືຄຳເວົ້າຂອງຜູ້ສໍ່ສຽດ ມຸ້ງທຳລາຍມິດໄມຕີ
ຜູ້ນັ້ນຈະຕ້ອງນອນຕາຍແນວນີ້

[໑໙໖] ນາຍສາຣະຖີ ຊົນເຫຼົ່າໃດບໍ່ເຊື່ອຄຳເວົ້າຂອງຜູ້ມຸ້ງທຳລາຍມິດໄມຕີ
ຊົນເຫຼົ່ານັ້ນຍ່ອມປະສົບຄວາມສຸກ ເໝືອນຄົນໄດ້ໄປສະຫວັນ

**ສັນທິເພທະຊາດົກທີ ໙ ຈົບ**

## ໑໐. ເທວະດາປັນຫະຊາດົກ (໓໕໐)
## ວ່າດ້ວຍບັນຫາຂອງເທວະດາ

(ພຣະຣາຊາຕັດບອກບັນຫາທີ່ເທວະດາຖາມແກ່ພຣະໂພທິສັດມະໂຫສົດບັນດິດວ່າ)

[໑໙໗] ບຸກຄົນໃຊ້ມືທັງ ໔ ຕີນທັງ ໔ ທຸບຕີແລະຕົບປາກຜູ້ອື່ນ
ຂ້າແດ່ມະຫາຣາດ ເຂົາກັບເປັນທີ່ຮັກຍ້ອນເຫດແຫ່ງການທຸບຕີນັ້ນ
ພຣະອົງຊົງເຫັນວ່າເປັນຜູ້ໃດ

(ພຣະຣາຊາຕັດບອກບັນຫາຂໍ້ທີ ໔ ຕາມທີ່ເທວະດາຖາມວ່າ)

[໑໙໘] ບຸກຄົນດ່າຜູ້ອື່ນຕາມໃຈມັກ
ແຕ່ປາຖະໜາການກັບມາຂອງເຂົາ
ຂ້າແດ່ມະຫາຣາດ ເຂົາກັບເປັນທີ່ຮັກຍ້ອນເຫດແຫ່ງການດ່ານັ້ນ
ພຣະອົງຊົງເຫັນວ່າເປັນໃຜ

(ພຣະຣາຊາຕັດບອກບັນຫາຂໍ້ທີ ໓ ຕາມທີ່ເທວະດາຖາມວ່າ)

[໑໙໗] ບຸກຄົນກ່າວຕູ່ກັນດ້ວຍຄຳເວົ້າອັນບໍ່ເປັນຈິງ
ພາກັນໂຈດກັນດ້ວຍຄຳເວົ້າບໍ່ຈິງ
ຂ້າແດ່ມະຫາຣາດ ເຂົາກັບເປັນທີ່ຮັກຂອງກັນແລະກັນ
ຍ້ອນເຫດແຫ່ງການກ່າວຕູ່ແລະໂຈດກັນນັ້ນ
ພຣະອົງຊົງເຫັນວ່າເປັນຜູ້ໃດ

(ພຣະຣາຊາຕັດບອກບັນຫາຂໍ້ທີ ໔ ຕາມທີ່ເທວະດາຖາມວ່າ)

[໘໐໐] ບຸກຄົນນຳເຂົ້າ ນໍ້າ ຜ້າ ແລະເສນາສະນະໄປ
ພວກເຂົາຜູ້ນຳໄປກັບເປັນທີ່ຮັກໂດຍແທ້
ພວກເຂົາກັບເປັນທີ່ຮັກຍ້ອນເຫດແຫ່ງການນຳສິ່ງຂອງໄປ
ພຣະອົງຊົງເຫັນວ່າເປັນຜູ້ໃດ

**ເທວະດາປັນຫະຊາດົກທີ ໑໐ ຈົບ**

**ຈູລະກຸນາລະວັກທີ ໕ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ກັນທະຣີຊາດົກ | ໒. ວານະຣະຊາດົກ |
| ໓. ກຸນຕິນີຊາດົກ | ໔. ອຳພະຊາດົກ |
| ໕. ຄະຊະກຸມພະຊາດົກ | ໖. ເກສະວະຊາດົກ |
| ໗. ອະຍະກູຕະຊາດົກ | ໘. ອະຣັນຍະຊາດົກ |
| ໙. ສັນທິເພທະຊາດົກ | ໑໐. ເທວະດາປັນຫະຊາດົກ |

## ລວມວັກທີ່ມີໃນນິບາດນີ້ ຄື

| | |
|---|---|
| ໑. ກາລິງຄະວັກ | ໒. ປຸຈິມັນທະວັກ |
| ໓. ກຸຕິທູສະກະວັກ | ໔. ໂກກິລະວັກ |
| ໕. ຈູລະກຸນາລະວັກ | |

**ຈະຕຸກກະນິບາດ ຈົບ**

# ໕. ປັນຈະກະນິບາດ

## ໑. ມະນິກຸນທະລະວັກ

### ໝວດວ່າດ້ວຍຕຸ້ມຫູແກ້ວມະນີ

### ໑. ມະນິກຸນທະລະຊາດົກ (໓໕໑)

### ວ່າດ້ວຍຕຸ້ມຫູແກ້ວມະນີ

(ພຣະຣາຊາໂຈນເຂົ້າໄປຫາພຣະຣາຊາໂພທິສັດແຫ່ງເມືອງພາຣານະສີແລ້ວຕັດວ່າ)

[໑] ພຣະອົງໝົດສິ້ນ ລົດ ມ້າ ແລະຕຸ້ມຫູແກ້ວມະນີ
ອັນໜຶ່ງ ພຣະອົງໝົດສິ້ນພຣະໂອຣົດແລະນາງສະໜົມ
ເມື່ອໂພຄະທຸກສິ່ງທຸກຢ່າງບໍ່ມີເຫຼືອຢູ່ເລີຍ
ຍ້ອນເຫດໃດ ພຣະອົງບໍ່ຊົງເດືອດຮ້ອນໃນເວລາທີ່ຄວນເສົ້າໂສກ

(ພຣະຣາຊາໂພທິສັດຕັດຕອບວ່າ)

[໒] ໂພຄະທັງຫຼາຍລະຖິ້ມສັດໂລກໄປກ່ອນກໍມີ
ສັດໂລກລະຖິ້ມໂພຄະເຫຼົ່ານັ້ນໄປກ່ອນກໍມີ
ຂ້າແດ່ພຣະອົງຜູ້ຊົງຕ້ອງການຢູ່ໃນກາມ
ໂພຄະທັງຫຼາຍທີ່ສັດໃຊ້ສອຍຢູ່ເປັນຂອງບໍ່ແນ່ນອນ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງບໍ່ເສົ້າໂສກໃນເວລາທີ່ຄວນເສົ້າໂສກ

[໓] ດວງຈັນຂຶ້ນເຕັມດວງແລ້ວກໍແຫວ່ງໄປ
ດວງອາທິດເຮັດໂລກສ່ວນໃຫຍ່ໃຫ້ອົບອຸ່ນແລ້ວກໍລັບຂອບຟ້າໄປ
ຂ້າແດ່ ພຣະອົງຜູ້ຊົງເປັນສັດຕູ ໂລກທຳທັງຫຼາຍຂ້າພຣະອົງຮູ້ດີແລ້ວ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງບໍ່ເສົ້າໂສກໃນເວລາທີ່ຄວນເສົ້າໂສກ

(ພຣະຣາຊາໂພທິສັດຊົງສະແດງທຳແກ່ພຣະຣາຊາໂຈນແລ້ວຊົງຕິຕຽນວ່າ)

[໔] ຄະລິຫັດຜູ້ບໍຣິໂພກກາມຂີ້ຄ້ານບໍ່ດີ
ບັນພະຊິດບໍ່ສັງລວມບໍ່ດີ
ພຣະຣາຊາບໍ່ຊົງພິຈາຣະນາກ່ອນແລ້ວເຮັດບໍ່ດີ
ການທີ່ບັນດິດມັກໂກດບໍ່ດີ

[໕] ຂ້າແດ່ ພຣະອົງຜູ້ເປັນເຈົ້າແຫ່ງທິດ
ກະສັດຊົງພິຈາຣະນາກ່ອນແລ້ວຈຶ່ງຄວນເຮັດ
ບໍ່ຊົງພິຈາຣະນາກ່ອນແລ້ວບໍ່ຄວນຕັດສິນ
ຍົດແລະກຽດຍ່ອມຈະເລີນແດ່ພຣະຣາຊາຜູ້ຊົງພິຈາຣະນາກ່ອນແລ້ວຈຶ່ງເຮັດ

**ມະນີກຸນທະກະໄລະຊາດົກທີ ໑ ຈົບ**

## ໔. ສຸຊາຕະຊາດົກ (໓໕໘)

**ວ່າດ້ວຍສຸຊາຕະກຸມານໂພທິສັດ**

(ບິດາຂອງສຸຊາຕະກຸມານໂພທິສັດກ່າວວ່າ)

[໖] ເປັນຫຍັງນໍ ລູກເບິ່ງເໝືອນຮີບເລັ່ງກ່ຽວຫຍ້າສົດຂຽວຢູ່
ແລ້ວເວົ້າຈົ່ມເພີ້ກັບງົວແກ່ທີ່ຕາຍໄປແລ້ວວ່າ
ເຈົ້າຈົ່ງກິນ ເຈົ້າຈົ່ງກິນ

[໗] ງົວທີ່ຕາຍໄປແລ້ວລຸກຂຶ້ນມາບໍ່ໄດ້ຍ້ອນເຂົ້າຍ້ອນນໍ້າ
ລູກຈົ່ມເພີ້ໄປຊື່ ໆ ເໝືອນຄົນຂາດຄວາມຄິດ

(ສຸຊາຕະກຸມານໂພທິສັດກ່າວຕອບວ່າ)

[໘] ຫົວຂອງງົວກໍຍັງມີຢູ່ຄືເກົ່າ
ສອງຕີນໜ້າ ສອງຕີນຫຼັງ ຫາງ
ແລະຫູຂອງງົວກໍຍັງມີຢູ່ຄືເກົ່າ
ເຮົາສຳຄັນວ່າ ງົວຕົວນີ້ຈະເພິ່ງລຸກຂຶ້ນໄດ້

[໙] ສ່ວນຫົວ ມືທັງ ໔ ແລະຕີນທັງ ໔ ຂອງທ່ານປູ່ບໍ່ຜາກົດເລີຍ
ທ່ານພໍ່ນັ້ນແລຮ້ອງໄຫ້ຢູ່ທີ່ສະຖູບດິນ ເປັນຄົນຂາດຄວາມຄິດບໍ່ແມ່ນບໍ?

(ບິດາຊົມເຊີຍບຸດວ່າ)

[໑໐] ລູກຊ່ອຍຣະງັບພໍ່ຜູ້ຮ້ອນຮົນໃຫ້ສະງົບ
ດັບຄວາມກະວົນກະວາຍທັງໝົດໄດ້
ເໝືອນຄົນໃຊ້ນໍ້າຫົດດັບໄຟທີ່ໄໝ້ນໍ້າມັນປຽງ

[໑໑] ລູກນັ້ນໄດ້ບັນເທົາຄວາມເສົ້າໂສກຂອງພໍ່ຜູ້ກຳລັງເສົ້າໂສກເຖິງປູ່

ຊື່ວ່າໄດ້ຊ່ອຍຖອນລູກສອນຄືຄວາມເສົ້າໂສກ
ເຊິ່ງສຽບຢູ່ຫົວໃຈຂອງພໍ່ຂຶ້ນໄດ້ແລ້ວນໍ

[໑໔] ພໍ່ຜູ້ອັນລູກໄດ້ຊ່ອຍຖອນລູກສອນຄືຄວາມເສົ້າໂສກຂຶ້ນໄດ້ແລ້ວ
ເປັນຜູ້ປາສະຈາກຄວາມເສົ້າໂສກ ບໍ່ມີຄວາມຂຸ່ນມົວ
ຈະບໍ່ເສົ້າໂສກ ບໍ່ຮ້ອງໄຫ້ ຍ້ອນໄດ້ຟັງຄໍາຂອງລູກ ລູກເອີຍ

[໑໑] ນໍຣະຊົນທັງຫຼາຍຜູ້ມີປັນຍາ ຈະເປັນຜູ້ອະນຸເຄາະ
ຍ່ອມເຮັດໃຫ້ຜູ້ອື່ນປາສະຈາກຄວາມເສົ້າໂສກ
ເໝືອນສຸຊາຕະກຸມານເຮັດໃຫ້ບິດາປາສະຈາກຄວາມເສົ້າໂສກ

**ສຸຊາຕະຊາດົກທີ ໔ ຈົບ**

## ໑. ເວນະສາຂະຊາດົກ (໑໕໑)
## ວ່າດ້ວຍຕົ້ນໄມ້ປ້ອງກັນໄພບໍ່ໄດ້

(ພຣະໂພທິສັດເປັນອາຈານທິສາປາໂມກກ່າວສອນພົມມະທັດຕະກຸມານວ່າ)

[໑໔] ພົມມະທັດຕະກຸມານ ຄວາມກະເສມສໍາຣານ ພິກສາທີ່ຫາໄດ້ງ່າຍ
ຄວາມສຸກສໍາຣານກາຍ ທັງໝົດນີ້ບໍ່ມີຕະຫຼອດການເປັນນິດ
ເມື່ອປະໂຫຍດສິ້ນໄປ ທ່ານຢ່າໄດ້ຫຼົງລືມ
ເໝືອນຄົນເຮືອແຕກທ່າມກາງສາຄອນເລີຍ

[໑໕] ຄົນເຮັດກໍາໃດໄວ້ຍ່ອມເຫັນກໍານັ້ນໃນຕົນ
ຄົນເຮັດກໍາດີຍ່ອມໄດ້ຮັບຜົນດີ
ຄົນເຮັດກໍາຊົ່ວຍ່ອມໄດ້ຮັບຜົນຊົ່ວ
ຄົນຫວ່ານພືດແນວໃດ ຍ່ອມໄດ້ຮັບຜົນແນວນັ້ນ

(ພົມມະທັດຕະກຸມານນັ້ນກໍານົດຄໍາຂອງພຣະໂພທິສັດໄດ້ແລ້ວ ຈິ່ງເພີ້ຍູ່ວ່າ)

[໑໖] ທ່ານອາຈານປາຣາສະຣິຍະໄດ້ກ່າວຄໍາໃດໄວ້ວ່າ
ທ່ານຢ່າໄດ້ທໍາຄວາມຊົ່ວທີ່ເຮັດແລ້ວຈະເຮັດຕົນໃຫ້ເດືອດຮ້ອນໃນພາຍຫຼັງ
ຄໍານີ້ເປັນຄໍາຂອງອາຈານ

[໑໗] ປິງຄິຍະ ເຮົາໄດ້ສໍາເລັດໂທດກະສັດ ໑,໐໐໐ ພຣະອົງ

ຜູ້ປະດັບພຣະວໍຣະກາຍ ລູບໄລ້ດ້ວຍຈຸນແກ່ນຈັນທີ່ຕົ້ນໄມ້ໃດ
ຕົ້ນໄມ້ນັ້ນມີງ່າກ້ານສາຂາແຜ່ໄພສານຄືຕົ້ນນີ້ເອງ
ທຸກນັ້ນນັ້ນເອງກໍກັບມາສະໜອງເຮົາ

(ຕໍ່ມາພິມມະທັດຕະກຸມານຊົງຄ່ຳຄວນຢູ່ຢ່າງນັ້ນ ທວນຣະນຶກເຖິງພຣະອັກຄະຣະມະເຫສີ ຈຶ່ງກ່າວວ່າ)

[໑໗] ພຣະນາງສາມາຜູ້ມີພຣະວໍຣະກາຍລູບໄລ້ດ້ວຍຈຸນແກ່ນຈັນ
ງາມຣະຫົງດັ່ງງ່າໄຜ່ທີ່ແກວ່ງໄກວໄປມາ
ເຮົາບໍ່ເຫັນພຣະມະເຫສີຈັກຕາຍ
ການບໍ່ໄດ້ເຫັນພຣະມະເຫສີຂອງເຮົານັ້ນ
ຈັກເປັນທຸກຍິ່ງກວ່າທຸກຄືຄວາມຕາຍນີ້

**ເວນະສາຂະຊາດົກທີ ໓ ຈົບ**

## ໔. ອຸຣະຄະຊາດົກ (໓໕໔)
## ວ່າດ້ວຍຄົນຕາຍເໝືອນງູລອກຄາບ

(ພາມໂພທິສັດບອກເຫດແຫ່ງການບໍ່ຮ້ອງໄຫ້ແກ່ທ້າວສັກກະວ່າ)

[໑໘] ບຸດຂອງຂ້າພະເຈົ້າລະຖິ້ມຮ່າງກາຍຂອງຕົນໄປ ເໝືອນງູລອກຄາບເກົ່າ
ເມື່ອຮ່າງກາຍໃຊ້ການບໍ່ໄດ້ ຈຶ່ງລະໄປຕາຍໄປແນວນີ້

[໒໐] ເຂົາຖືກເຜົາກໍບໍ່ຮູ້ເຖິງຄວາມຄ່ຳຄວນຂອງໝູ່ຍາດ
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງບໍ່ເສົ້າໂສກເຖິງເຂົາ
ເຂົາໄປແລ້ວຕາມຄະຕິຂອງເຂົາ

(ນາງພາມມະນີບອກເຫດທີ່ບໍ່ຮ້ອງໄຫ້ແກ່ທ້າວສັກກະວ່າ)

[໒໑] ບຸດຂອງຂ້າພະເຈົ້ານີ້ ຂ້າພະເຈົ້າບໍ່ໄດ້ເຊີນມາຈາກໂລກອື່ນ ເຂົາກໍມາ
ຂ້າພະເຈົ້າບໍ່ໄດ້ອະນຸຍາດ ກໍໄປຈາກໂລກນີ້
ເຂົາມາແນວໃດ ເຂົາກໍໄປແນວນັ້ນ
ຈະຄ່ຳຄວນໄປເຮັດຫຍັງຍ້ອນການໄປຂອງເຂົານັ້ນ

[໒໒] ເຂົາກຳລັງຖືກເຜົາ ກໍບໍ່ຮູ້ເຖິງຄວາມຄ່ຳຄວນຂອງພວກຍາດ

ເພາະສະນັ້ນ ຂ້າພະເຈົ້າຈຶ່ງບໍ່ເສົ້າໂສກເຖິງເຂົາ
ເຂົາໄປແລ້ວຕາມຄະຕິຂອງເຂົາ

(ນ້ອງສາວບອກເຫດທີ່ບໍ່ຮ້ອງໄຫ້ແກ່ທ້າວສັກກະວ່າ)

[໘໓] ຖ້າຂ້າພະເຈົ້າຮ້ອງໄຫ້ ກໍຈະເພິ່ງມີຮ່າງກາຍຜ່າຍຜອມ
ຈະມີຜົນດີອັນໃດແກ່ຂ້າພະເຈົ້ານໍ
ຍາດ ມິດ ສະຫາຍຂອງຂ້າພະເຈົ້າກໍຈະບໍ່ມີຄວາມພໍໃຈຢ່າງຍິ່ງ

[໘໔] ອ້າຍຂອງຂ້າພະເຈົ້າກຳລັງຖືກເຜົາ
ກໍບໍ່ຮູ້ເຖິງຄວາມຄ່ຳຄວນຂອງພວກຍາດ
ເພາະສະນັ້ນ ຂ້າພະເຈົ້າຈຶ່ງບໍ່ເສົ້າໂສກເຖິງເຂົາ
ເຂົາໄປແລ້ວຕາມຄະຕິຂອງເຂົາ

(ພັນລະຍາບອກເຫດທີ່ບໍ່ຮ້ອງໄຫ້ແກ່ທ້າວສັກກະວ່າ)

[໘໕] ຄົນທີ່ຮ້ອງໄຫ້ເຖິງຄົນທີ່ຕາຍແລ້ວ ປຽບເໝືອນເດັກນ້ອຍທີ່ຮ້ອງໄຫ້
ຕ້ອງການດວງຈັນທີ່ໂຄຈອນໄປໃນອາກາດ

[໘໖] ສາມີຂອງຂ້າພະເຈົ້າກຳລັງຖືກເຜົາ
ກໍບໍ່ຮູ້ເຖິງຄວາມຄ່ຳຄວນຂອງພວກຍາດ
ເພາະສະນັ້ນ ຂ້າພະເຈົ້າຈຶ່ງບໍ່ເສົ້າໂສກເຖິງເຂົາ
ເຂົາໄປແລ້ວຕາມຄະຕິຂອງເຂົາ

(ສາວໃຊ້ບອກເຫດທີ່ບໍ່ຮ້ອງໄຫ້ແກ່ທ້າວສັກກະວ່າ)

[໘໗] ຄົນທີ່ຮ້ອງໄຫ້ເຖິງຄົນທີ່ຕາຍແລ້ວ ເປັນສິ່ງຂາດປະໂຫຍດ
ປຽບເໝືອນໝໍ້ນ້ຳທີ່ແຕກແລ້ວຈະປະສານໃຫ້ຕິດຄືເກົ່າບໍ່ໄດ້

[໘໘] ນາຍຂອງຂ້າພະເຈົ້າກຳລັງຖືກເຜົາ
ກໍບໍ່ຮູ້ເຖິງຄວາມຄ່ຳຄວນຂອງພວກຍາດ
ເພາະສະນັ້ນ ຂ້າພະເຈົ້າຈຶ່ງບໍ່ເສົ້າໂສກເຖິງເຂົາ
ເຂົາໄປແລ້ວຕາມຄະຕິຂອງເຂົາ

**ອຸຣະຄະຊາດົກທີ ໔ ຈົບ**

# ៥. ຄະຕະຊາດົກ (໓៥៥)
## ວ່າດ້ວຍພຣະເຈົ້າຄະຕະ

(ພຣະເຈົ້າທັງກະຕັດຖາມພຣະຣາຊາໂພທິສັດວ່າ)

[໔໙] ຊົນເຫຼົ່າອື່ນເສົ້າໂສກ ຮ້ອງໄຫ້ ມີນ້ຳຕານອງໜ້າ
ສ່ວນພຣະອົງມີພຣະພັກຜ່ອງໃສ
ພຣະເຈົ້າ ຄະຕະ ຍ້ອນເຫດໃດ ພຣະອົງຈຶ່ງບໍ່ເສົ້າໂສກ

(ພຣະໂພທິສັດຂາບທູນເຖິງເຫດທີ່ບໍ່ເສົ້າໂສກແກ່ພຣະເຈົ້າທັງກະວ່າ)

[໕໐] ຄວາມໂສກນຳສິ່ງທີ່ລ່ວງໄປແລ້ວຄືນມາບໍ່ໄດ້
ນຳຄວາມສຸກທີ່ຍັງບໍ່ມາເຖິງມາໃຫ້ບໍ່ໄດ້
ພຣະເຈົ້າທັງກະ ຍ້ອນເຫດນັ້ນ ຂ້ານ້ອຍຈຶ່ງບໍ່ເສົ້າໂສກ
ຍ້ອນຄວາມເປັນສະຫາຍໃນຄວາມເສົ້າໂສກບໍ່ມີ

[໕໑] ຜູ້ເສົ້າໂສກຍ່ອມມີຮ່າງກາຍຜອມເຫຼືອງແລະເບື່ອອາຫານ
ເມື່ອເຂົາຖືກລູກສອນຄືຄວາມເສົ້າໂສກສຽບແທງຈົນຊູບຊີດ
ພວກສັດຕູກໍພາກັນດີໃຈ

[໕໔] ເຮົາຈະຢູ່ບ້ານຫຼືຢູ່ປ່າ
ຢູ່ບ່ອນລຸ່ມຫຼືຢູ່ບ່ອນໂນນກໍຕາມ
ຄວາມພິນາດຈະບໍ່ມາເຖິງເຮົາເລີຍ
ຍ້ອນເຮົາໄດ້ພົບທາງແລ້ວແນວນີ້

[໕໕] ຕົນເອງຜູ້ດຽວທີ່ນັ້ນກໍບໍ່ສາມາດຈະນຳຣົດອັນໜ້າຕ້ອງການ
ທັງປວງ ມາຖວາຍແກ່ພຣະຣາຊາພຣະອົງໃດໄດ້
ແມ່ນແຜ່ນດິນທັງປວງກໍຈັກນຳຄວາມສຸກມາຖວາຍ
ແດ່ພຣະຣາຊາພຣະອົງນັ້ນກໍບໍ່ໄດ້

**ຄະຕະຊາດົກທີ ៥ ຈົບ**

# ໖. ກາຣັນທິຍະຊາດົກ (໓໕໖)
## ວ່າດ້ວຍກາຣັນທິຍະພາມ

(ອາຈານເຈຣະຈາກັບກາຣັນທິຍະໂພທິສັດວ່າ)

[໓໔] ເຈົ້າຄົນດຽວຟ້າວເກີນໄປ ຍົກຫີນກ້ອນໃຫຍ່ຖິ້ມລົງໄປທີ່ຮ່ອມພູໃນປ່າ
ນີ້ເຈົ້າກາຣັນທິຍະ ຈະມີປະໂຫຍດອັນໃດແກ່ເຈົ້າ
ດ້ວຍການຖິ້ມກ້ອນຫີນລົງທີ່ຮ່ອມພູນີ້

(ກາຣັນທິຍະໂພທິສັດຟັງຄຳຂອງທ່ານແລ້ວ ປະສົງຈະປຸກອາຈານໃຫ້ຮູ້ສຶກ ຈຶ່ງກ່າວວ່າ)

[໓໕] ຂ້ານ້ອຍເຂ່ຍກ້ອນດິນແລະກ້ອນຫີນລົງໄປ
ຈະເຮັດແຜ່ນດິນໃຫຍ່ນີ້ເຊິ່ງມີສາຄອນເປັນຂອບເຂດ
ໃຫ້ຮາບພຽງດັ່ງຝ່າມື
ເພາະສະນັ້ນ ຂ້ານ້ອຍຈຶ່ງຖິ້ມກ້ອນຫີນລົງໄປທີ່ຮ່ອມພູ

(ພາມໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໓໖] ມະນຸດຄົນດຽວບໍ່ສາມາດເຮັດແຜ່ນດິນນີ້ໃຫ້ຮາບພຽງດັ່ງຝ່າມືໄດ້
ນີ້ເຈົ້າກາຣັນທິຍະ ເຮົາສຳຄັນວ່າ
ເຈົ້າເມື່ອປາຖະໜາຈະເຮັດຮ່ອມພູນີ້ໃຫ້ເຕັມ
ຈະຕ້ອງລະຊີວະໂລກໄປສາກ່ອນ

(ກາຣັນທິຍະໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໓໗] ຖ້າມະນຸດຄົນດຽວບໍ່ສາມາດຈະເຮັດແຜ່ນດິນໃຫຍ່ໃຫ້ພຽງໄດ້
ທ່ານພາມ ທ່ານກໍຄືກັນ ຈັກນຳມະນຸດເຫຼົ່ານີ້
ເຊິ່ງມີຄວາມເຫັນຕ່າງ ໆ ກັນມາສູ່ອຳນາດຂອງຕົນບໍ່ໄດ້

(ອາຈານໄດ້ຟັງດັ່ງນັ້ນຮູ້ວ່າຕົວພາດໄປແລ້ວ ຈຶ່ງກ່າວວ່າ)

[໓໘] ເຈົ້າກາຣັນທິຍະ ເຈົ້າໄດ້ບອກຂໍ້ຄວາມທີ່ເປັນຈິງແກ່ເຮົາໂດຍຫຍໍ້
ຂໍ້ນີ້ເປັນແນວນັ້ນ
ແຜ່ນດິນນີ້ມະນຸດບໍ່ສາມາດຈະເຮັດໃຫ້ພຽງໄດ້ສັນໃດ
ມະນຸດທັງຫຼາຍກໍສັນນັ້ນ

**ກາຣັນທິຍະຊາດົກທີ ໖ ຈົບ**

# ၅. ລະຕຸກິກະຊາດົກ (໓໕໗)
## ວ່າດ້ວຍນາງນົກໄສ້

(ນາງນົກໄສ້ປະຄອງປີກຢືນຂ້າງໜ້າພະຍາຊ້າງໂພທິສັດແລ້ວກ່າວວ່າ)

[໓໙] ພະຍາຊ້າງ ຂ້າພະເຈົ້າຂໍໄຫວ້ທ່ານ
ຜູ້ມີກຳລັງເສື່ອມຖອຍໂດຍການທີ່ມີອາຍຸ ໖໐ ປີ
ຜູ້ຢູ່ໃນປ່າ ເປັນຈ່າຝູງ ພຽບພ້ອມດ້ວຍຍົດ
ຂ້າພະເຈົ້າຂໍໄຫວ້ທ່ານດ້ວຍປີກທັງ ໒ ຂ້າງ
ຂໍທ່ານຢ່າໄດ້ຂ້າລູກນ້ອຍຜູ້ດ້ອຍກຳລັງຂອງຂ້າພະເຈົ້າ

(ນາງນົກໄສ້ນັ້ນກ່າວຕ້ອນຮັບພະຍາຊ້າງນັ້ນຜູ້ທ່ຽວໄປຕາມລຳພັງເຊືອກດຽວວ່າ)

[໔໐] ພະຍາຊ້າງ ຂ້າພະເຈົ້າຂໍໄຫວ້ທ່ານຜູ້ທ່ຽວໄປຜູ້ດຽວ
ຢູ່ໃນປ່າ ຫາກິນຕາມຕີນພູ
ຂ້າພະເຈົ້າຂໍໄຫວ້ທ່ານດ້ວຍປີກທັງ ໒ ຂ້າງ
ຂໍທ່ານຢ່າໄດ້ຂ້າລູກນ້ອຍຜູ້ດ້ອຍກຳລັງຂອງຂ້າພະເຈົ້າ

(ພະຍາຊ້າງໄດ້ຟັງຄຳຂອງນາງນົກໄສ້ນັ້ນ ຈຶ່ງກ່າວວ່າ)

[໔໑] ນີ້ນາງນົກໄສ້ ເຮົາຈະຂ້າລູກນ້ອຍຂອງເຈົ້າ
ເຈົ້າມີກຳລັງໜ້ອຍຈະເຮັດຫຍັງໄດ້
ເຮົາຈະໃຊ້ຕີນຊ້າຍບົດຍ່ອງນົກໄສ້ເຊັ່ນເຈົ້າ
ແມ່ນຕັ້ງ ໑໐໐,໐໐໐ ຕົວໃຫ້ແຫຼກລະອຽດ

(ນາງນົກໄສ້ແອບຢູ່ທີ່ງ່າໄມ້ກ່າວຄຸກຄາມພະຍາຊ້າງນັ້ນວ່າ)

[໔໒] ກຳລັງບໍ່ແມ່ນວ່າຈະເຮັດກິດໃຫ້ສຳເລັດທຸກຢ່າງ
ຍ້ອນວ່າ ຄົນໂງ່ຈ້າມີກຳລັງໄວ້ເພື່ອຂ້າຜູ້ອື່ນແລະຕົນເອງ
ພະຍາຊ້າງ ຂ້າພະເຈົ້າຈະທຳຄວາມຫາຍຍານະໃຫ້ແກ່ທ່ານ
ທີ່ຂ້າລູກນ້ອຍຜູ້ດ້ອຍກຳລັງຂອງເຮົາ

(ພຣະສາດສະດາຊົງປະມວນຊາດົກ ຕັດພຣະຄາຖານີ້ວ່າ)

[໔໓] ທ່ານຈົ່ງເບິ່ງກາ ນາງນົກໄສ້ ກົບ ແລະແມງວັນຫົວຂຽວ

ສັດເຫຼົ່ານີ້ໄດ້ຂ້າຊ້າງແລ້ວ ຈົ່ງເບິ່ງການຈອງເວນຂອງຄົນຄູ່ເວນທັງຫຼາຍ
ເພາະສະນັ້ນ ພວກທ່ານຢ່າກໍ່ເວນກັບໃຜ ໆ ແມ່ນກັບຄົນບໍ່ເປັນທີ່ຮັກເລີຍ

**ລະຕຸກິກະຊາດົກທີ ໗ ຈົບ**

## ໘. ຈູລະທຳມະປາລະຊາດົກ (໓໕໘)
## ວ່າດ້ວຍຈູລະທຳປາລະກຸມານ

(ພຣະນາງຈັນທາເທວີຂາບທູນພຣະຣາຊາວ່າ)

[໘໔] ຂ້ານ້ອຍທໍ່ນັ້ນທີ່ຕັດຄວາມຈະເລີນ
ທຳຄວາມຜິດຕໍ່ພຣະເຈົ້າມະຫາປະຕາປະ
ຂ້າແດ່ພຣະອົງ ຂໍພຣະອົງໂຜດຊົງປ່ອຍທຳມະປາລະກຸມານ
ແລະໂຜດຊົງຕັດມືທັງ ໘ ຂອງຂ້ານ້ອຍເທີ້ນ

[໘໕] ຂ້ານ້ອຍທໍ່ນັ້ນທີ່ຕັດຄວາມຈະເລີນ
ທຳຄວາມຜິດຕໍ່ພຣະເຈົ້າມະຫາປະຕາປະ
ຂ້າແດ່ພຣະອົງ ຂໍພຣະອົງໂຜດຊົງປ່ອຍທຳມະປາລະກຸມານ
ແລະໂຜດຊົງຕັດຕີນທັງ ໘ ຂອງຂ້ານ້ອຍເທີ້ນ

[໘໖] ຂ້ານ້ອຍທໍ່ນັ້ນທີ່ຕັດຄວາມຈະເລີນ
ທຳຄວາມຜິດຕໍ່ພຣະເຈົ້າມະຫາປະຕາປະ
ຂ້າແດ່ພຣະອົງ ຂໍພຣະອົງໂຜດຊົງປ່ອຍທຳມະປາລະກຸມານ
ແລະໂຜດຊົງຕັດຫົວຂອງຂ້ານ້ອຍເທີ້ນ

[໘໗] ມິດຫຼືອຳມາດບາງຄົນທີ່ມີຈິດໃຈງົດງາມ
ອ່ອນໂຍນຂອງພຣະຣາຊາພຣະອົງນີ້ຄົງບໍ່ມີແນ່
ຄົນທີ່ຈະທູນທັດທານພຣະຣາຊາວ່າ
ຂໍພຣະອົງໂຜດຢ່າສຳເລັດໂທດພຣະຣາດຊະບຸດ
ຜູ້ທີ່ພຣະອົງໃຫ້ກຳເນີດກໍບໍ່ມີ

[໘໘] ພຣະຍາດຫຼືພຣະສະຫາຍບາງຄົນທີ່ມີຈິດໃຈງົດງາມ
ອ່ອນໂຍນຂອງພຣະຣາຊາພຣະອົງນີ້ຄົງບໍ່ມີແນ່
ຄົນທີ່ຈະທູນທັດທານພຣະຣາຊາວ່າ ຂໍພຣະອົງໂຜດຢ່າສຳເລັດໂທດ
ພຣະໂອຣົດຜູ້ທີ່ພຣະອົງໃຫ້ກຳເນີດກໍບໍ່ມີ

[໔໗] ພຣະພາຫາທັງ ໔ ທີ່ລູບໄລ້ດ້ວຍຈຸນແກ່ນຈັນ
ຂອງທຳມະປາລະກຸມານຜູ້ເປັນທາຍາດແຫ່ງແຜ່ນດິນມາຂາດສິ້ນໄປ
ຂ້າແດ່ພຣະອົງ ລົມປານຂອງຂ້າພຣະອົງກໍຈະດັບສິ້ນໄປ

**ຈູລະທຳມະປາລະຊາດົກທີ ໗ ຈົບ**

## ໗. ສຸວັນນະມິຄະຊາດົກ (໓໕໗)

## ວ່າດ້ວຍພະຍາກວາງຄຳ

(ພັນລະຍາຂອງພະຍາເນື້ອໂພທິສັດເມື່ອຈະໃຫ້ພະຍາເນື້ອເກີດອຸດສາຫະຈຶ່ງກ່າວວ່າ)

[໕໐] ພະຍາເນື້ອຜູ້ມີຕີນຄືດັ່ງຄຳ ທ່ານຈົ່ງພະຍາຍາມດຶງເທີ້ນ
ຈົ່ງກັດບ້ວງໜັງໃຫ້ຂາດ ເຮົາຈະມີຄວາມສຸກຢູ່ໃນປ່າຜູ້ດຽວບໍ່ໄດ້

(ພະຍາເນື້ອໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໕໑] ເຮົາພະຍາຍາມດຶງຢູ່ກໍບໍ່ສຳເລັດ ເຮົາຂວັດພື້ນດິນຢ່າງແຮງ
ບ່ວງໜັງອັນໜຽວກໍຍິ່ງບາດຕີນຂອງເຮົາ

(ນາງເນື້ອກ່າວແກ່ນາຍພານວ່າ)

[໕໒] ນາຍພານ ທ່ານຈົ່ງປູລາດໃບໄມ້
ດຶງດາບອອກມາຂ້າຂ້າພະເຈົ້າກ່ອນ
ແລ້ວຈຶ່ງຂ້າພະຍາເນື້ອໃນພາຍຫຼັງ

(ນາຍພານໄດ້ຟັງດັ່ງນັ້ນມີຈິດເຫຼື້ອມໃສ ຈຶ່ງກ່າວວ່າ)

[໕໓] ເຮົາບໍ່ເຄີຍໄດ້ຍິນຫຼືໄດ້ເຫັນມາກ່ອນວ່າ
ແມ່ເນື້ອເວົ້າພາສາມະນຸດໄດ້
ນີ້ແມ່ເນື້ອຜູ້ຈະເລີນ ຕົວເຈົ້າແລະພະຍາເນື້ອຕົວນີ້ຈົ່ງເປັນສຸກເທີ້ນ

(ນາງພະຍາເນື້ອກ່າວວ່າ)

[໕໔] ນາຍພານ ວັນນີ້ຂ້າພະເຈົ້າເຫັນພະຍາເນື້ອ
ພົ້ນຈາກອັນຕະລາຍແລ້ວຍ່ອມມີຄວາມສຸກສັນໃດ
ຂໍທ່ານພ້ອມກັບຍາດທັງໝົດຈົ່ງມີຄວາມສຸກສັນນັ້ນເທີ້ນ

**ສຸວັນນະມິຄະຊາດົກທີ ໘ ຈົບ**

# ໑໐. ສຸສັນທິຊາດົກ (໓໖໐)
## ວ່າດ້ວຍພຣະນາງສຸສັນທີ

(ຄົນທັນຊື່ອັກຄະ ເມື່ອໃນເວລາພະຍາຄຸດໂພທິສັດມາຫຼິ້ນສະກາ ຈຶ່ງຖືພິນຂັບຮ້ອງຖວາຍພຣະຣາຊາວ່າ)

[໔໔] ກິ່ນດອກຕິມິຣະຫອມຕະຫຼົບອົບອວນ
ຄື້ນມະຫາສະມຸດກະທົບຝັ່ງດັງກຶກກ້ອງ
ພຣະນາງສຸສັນທີປະທັບຢູ່ໄກຈາກພຣະນະຄອນນີ້ຫຼາຍ
ພຣະເຈົ້າຕຳພະ ກາມທັງຫຼາຍຍ່ອມສຽດແທງຂ້າພຣະອົງ

(ພະຍາຄຸດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໔໕] ທ່ານຂ້າມມະຫາສະມຸດໄປໄດ້ແນວໃດ
ເຫັນເກາະເສຣຸມະໄດ້ແນວໃດ
ທ່ານອັກຄະ ພຣະນາງກັບທ່ານພົບກັນໄດ້ແນວໃດ

(ລຳດັບນັ້ນ ຄົນທັນຊື່ອັກຄະໄດ້ກ່າວວ່າ)

[໔໖] ເມື່ອເຮືອພວກພໍ່ຄ້າຜູ້ສະແຫວງຫາຊັບອອກໄປຈາກທ່າພະຣຸກັດສາ
ຖືກປາມັງກອນຕີແຕກ ຂ້າພະເຈົ້າເກາະແຜ່ນແປ້ນລອຍໄປ

[໔໗] ພຣະນາງສຸສັນທີມີພຣະວໍຣະກາຍຫອມເພາະກິ່ນຈັນຢູ່ເປັນນິດ
ຊົງປອບໂຍນຂ້າພຣະອົງດ້ວຍພຣະສຸຣະສຽງອັນມ່ວນນຸ້ມນວນ
ແລ້ວຊົງອຸ້ມຂ້າພຣະອົງເໝືອນມານດາອຸ້ມລູກໃນໄສ້

[໔໘] ພຣະນາງສຸສັນທີມີດວງພຣະເນດອ່ອນໂຍນ
ຊົງບຳຣຸງຂ້າພຣະອົງດ້ວຍເຂົ້າ ນ້ຳ ຜ້າ
ແລະບ່ອນນອນດ້ວຍພຣະອົງເອງ
ຂ້າແດ່ພຣະເຈົ້າຕຳພະ ຂໍພຣະອົງຊົງຮູ້ແນວນີ້

**ສຸສັນທິຊາດົກທີ ໑໐ ຈົບ**

**ມະນິກຸນທະລະວັກທີ ໑ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື



# ໔. ວັນນາໂຣຫະວັກ

## ໝວດວ່າດ້ວຍມີຜິວພັນຕ່າງກັນ

## ໑. ວັນນາໂຣຫະຊາດົກ (໓໖໑)

### ວ່າດ້ວຍຜູ້ມີຜິວພັນແລະຊວດຊົງຕ່າງກັນ

(ເສືອໂຄ່ງເຂົ້າໄປຫາພະຍາຣາດຊະສີແລ້ວຖາມວ່າ)

[໖໐] ທ່ານຜູ້ມີແຂ້ວງາມ ທ່ານໄດ້ກ່າວວ່າ
ເສືອໂຄ່ງຊື່ສຸພາຫຸບໍ່ປະເສີດໄປກວ່າເຮົາ
ດ້ວຍຜິວພັນ ຊວດຊົງ ຊາດ ກຳລັງກາຍ
ແລະກຳລັງຄວາມພຽນບໍ

(ຣາດຊະສີກ່າວຕອບວ່າ)

[໖໑] ສຸພາຫຸ ທ່ານໄດ້ກ່າວວ່າ
ຣາດຊະສີຕົວມີແຂ້ວງາມບໍ່ປະເສີດໄປກວ່າເຮົາ
ດ້ວຍຜິວພັນ ຊວດຊົງ ຊາດ ກຳລັງກາຍ
ແລະກຳລັງຄວາມພຽນບໍ

[໖໒] ສຸພາຫຸເພື່ອນຮັກ ຖ້າທ່ານປະທຸດສະຮ້າຍເຮົາ
ຜູ້ຢູ່ຮ່ວມກັບທ່ານແນວນີ້
ບັດນີ້ ເຮົາບໍ່ພໍໃຈທີ່ຈະຢູ່ຮ່ວມກັບທ່ານຕໍ່ໄປ

[໖໓] ຜູ້ໃດເຊື່ອຟັງຄຳເວົ້າຂອງບຸກຄົນເຫຼົ່າອື່ນຢ່າງຈິງຈັງ
ຜູ້ນັ້ນເພິ່ງແຕກຈາກມິດໂດຍໄວ
ແລະເພິ່ງປະສົບເວນຫຼວງຫຼາຍ

[໓໔] ຜູ້ໃດບໍ່ຜະໝາດ ຣະແວງການທຳລາຍມິດ
ຖ້າຈັບຜິດຢູ່ສະເໝີ ຜູ້ນັ້ນບໍ່ແມ່ນມິດ
ສ່ວນຜູ້ໃດ ຜູ້ອື່ນຍຸໃຫ້ແຕກກັນບໍ່ໄດ້ ບໍ່ມີຄວາມຣະແວງໃນມິດຄົນໃດ
ຢູ່ຢ່າງປອດໄພເໝືອນບຸດທີ່ນອນແນບເອິກມານດາ
ຜູ້ນັ້ນແລນັບວ່າເປັນມິດແທ້

**ວັນນາໂຣຫະຊາດົກທີ ໑ ຈົບ**

## ໔. ສີລະວີມັງສະຊາດົກ (໓໖໔)

## ວ່າດ້ວຍການທົດລອງສີນ

(ພາມໂພທິສັດຮູ້ວ່າ ສີນສຳຄັນກວ່າສຸຕະ ຈຶ່ງໄດ້ຂາບທູນພຣະຣາຊາວ່າ)

[໓໕] ຂ້າພຣະອົງມີຄວາມສົງໄສວ່າ
ສີນປະເສີດກວ່າ ຫຼືສຸຕະປະເສີດກວ່າ
ບັດນີ້ ຂ້າພຣະອົງໝົດຄວາມສົງໄສແລ້ວວ່າ
ສີນນັ້ນແລ ປະເສີດກວ່າສຸຕະ

[໓໖] ຊາດແລະຜິວພັນເປັນຂອງເປົ່າປະໂຫຍດ
ຮູ້ມາວ່າ ສີນທໍ່ນັ້ນປະເສີດສຸດ
ບຸກຄົນບໍ່ມີສີນ ມີພຽງສຸຕະທໍ່ນັ້ນ
ຍ່ອມບໍ່ມີຄວາມຈະເລີນ

[໓໗] ກະສັດບໍ່ດຳຣົງຢູ່ໃນທຳ ແພດບໍ່ອີງອາໄສທຳ
ຊົນທັງ ໔ ນັ້ນລະໂລກທັງ ໔ ໄປແລ້ວຍ່ອມເຂົ້າເຖິງທຸກຄະຕິ

[໓໘] ກະສັດ ພາມ ແພດ ສູດ ຈັນທານ ແລະຄົນຖອກຂີ້ເຫຍື່ອ
ປະພຶດທຳໃນໂລກນີ້ແລ້ວຍ່ອມເປັນຜູ້ສະເໝີກັນໃນເທວະໂລກ

[໓໙] ພຣະເວດກໍຕາມ ຊາດກໍຕາມ ພວກພ້ອງກໍຕາມ
ບໍ່ສາມາດຈະໃຫ້ຍົດແລະຄວາມສຸກໃນສຳປະຣາຍະພົບໄດ້
ແຕ່ສີນຂອງຕົນທີ່ບໍລິສຸດແລ້ວທໍ່ນັ້ນ
ນຳຄວາມສຸກມາໃຫ້ໃນສຳປະຣາຍະພົບ

**ສີລະວີມັງສະຊາດົກທີ ໔ ຈົບ**

## ໓. ທີຣິຊາດົກ (໓໒໓)
## ວ່າດ້ວຍຄວາມລະອາຍ

(ເສດຖີຊາວເມືອງພາຣານະສີເວົ້າກັບຄົນທັງຫຼາຍວ່າ)

[໗໐] ບັນດິດເພິ່ງຮູ້ຈັກບຸກຄົນຜູ້ບໍ່ມີຄວາມລະອາຍ
ກຽດຊັງຄວາມເປັນມິດ
ກ່າວຢູ່ວ່າ ເຮົາເປັນມິດຂອງທ່ານ
ແຕ່ບໍ່ເອື້ອເຟື້ອວຽກງານທີ່ເໝາະສົມກັບຄຳເວົ້າວ່າ
ບຸກຄົນນີ້ບໍ່ແມ່ນມິດຂອງເຮົາ

[໗໑] ງານໃດຄວນເຮັດ ເພິ່ງເວົ້າເຖິງແຕ່ງານນັ້ນເທີ້ນ
ງານໃດບໍ່ຄວນເຮັດ ກໍຢ່າເວົ້າເຖິງງານນັ້ນເລີຍ
ຄົນບໍ່ເຮັດ ເອົາແຕ່ເວົ້າ ບັນດິດຍ່ອມຮູ້ທັນ

[໗໔] ຜູ້ໃດບໍ່ຜະໝາດ ຣະແວງການທຳລາຍມິດ
ຖ້າຈັບຜິດຢູ່ສະເໝີ ຜູ້ນັ້ນບໍ່ແມ່ນມິດ
ສ່ວນຜູ້ໃດຜູ້ອື່ນຍຸໃຫ້ແຕກກັນບໍ່ໄດ້ ບໍ່ມີຄວາມຣະແວງໃນມິດຄົນໃດ
ຢູ່ຢ່າງປອດໄພເໝືອນບຸດທີ່ນອນແນບເອິກມານດາ
ຜູ້ນັ້ນແລນັບວ່າເປັນມິດແທ້

[໗໓] ກຸນລະບຸດເມື່ອເຫັນຜົນແລະອານິສົງ
ເມື່ອນຳທຸຣະອັນເປັນຂອງບຸຣຸດໄປຢູ່
ຊື່ວ່າຍ່ອມພ່ຳເພັງຖານະທີ່ທຳຄວາມປາໂມດ
ແລະຄວາມສຸກອັນນຳຄວາມສັນເສີນມາໃຫ້

[໗໔] ບຸກຄົນດື່ມຣົດອັນເກີດຍ້ອນຄວາມສະຫງັດ
ແລະຣົດແຫ່ງຄວາມສະງົບຊື່ວ່າດື່ມຣົດຄືປີຕິໃນທຳ
ຍ່ອມບໍ່ມີຄວາມກະວົນກະວາຍ ບໍ່ມີບາບ

**ທີຣິຊາດົກທີ ໓ ຈົບ**

## ໔. ຂັດໂຊປະນະກະຊາດົກ (໓໒໔)
## ວ່າດ້ວຍທີ່ງຫ້ອຍ

(ເທວະດາຖຸກຄາມພຣະຣາຊາແລ້ວ ກ່າວສອນດ້ວຍການຍົກຂັດໂຊປະນະບັນຫາດັ່ງ ນີ້ວ່າ)

[໗໕] ໃຜນໍ ເມື່ອໄຟລຸກສະຫວ່າງແຈ້ງຢູ່ ຍັງຫ່ງວສະແຫວງຫາໄຟ
ໄດ້ເຫັນຫິ່ງຫ້ອຍໃນຍາມຣາຕີ ກັບສຳຄັນວ່າໄຟ

[໗໖] ເຂົາປົບມູນງົວແລະຫຍ້າໃຫ້ມຸ່ນ
ແລ້ວເຂ່ຍລົງເທິງຫິ່ງຫ້ອຍນັ້ນ
ກໍບໍ່ອາດຈະໃຫ້ໄຟລຸກເປັນແປວໄດ້

[໗໗] ຄົນໂງ່ເປັນຄືດັ່ງຄົນໃບ້ ແມ່ນໂດຍອຸບາຍບໍ່ຖືກວິທີແນວນີ້ກໍບໍ່ໄດ້ຜົນ
ເໝືອນຄົນຮີດນົມຈາກເຂົາງົວຍ່ອມບໍ່ໄດ້ນ້ຳນົມ

[໗໘] ຊົນທັງຫຼາຍບັນລຸປະໂຫຍດທີ່ຕ້ອງການດ້ວຍອຸບາຍວິທີຕ່າງ ໆ
ຄື ການຂົ່ມສັດຕູແລະຍ້ອງຍໍມິດ

[໗໙] ພຣະເຈົ້າແຜ່ນດິນທັງຫຼາຍຊົງຄອບຄອງແຜ່ນດິນ
ອັນມີຊັບສົມບັດຢູ່ໄດ້ກໍດ້ວຍການໄດ້ໝູ່ອຳມາດມີແມ່ທັບເປັນປະມຸກ
ແລະດ້ວຍການຖວາຍຄຳແນະນຳຂອງໝູ່ອຳມາດຣາດຊະວັນລົບ

**ຂັດໂຊປະນະກະຊາດົກທີ ໔ ຈົບ**

## ໕. ອະຫິຕຸນທິກະຊາດົກ (໓໖໕)
## ວ່າດ້ວຍໝົ່ງ

(ໝົ່ງກ່າວກັບລີງວ່າ)

[໘໐] ນີ້ເພື່ອນຜູ້ມີໃບໜ້າງາມ
ເຮົາເປັນນັກເລງພ່າຍແພ້ການພະນັນສະກາ
ເຈົ້າຈົ່ງໂຍນໝາກມ່ວງສຸກມາໃຫ້ແດ່
ເຮົາຈະໄດ້ກິນໝາກມ່ວງຍ້ອນຄວາມພະຍາຍາມຂອງເຈົ້າ

(ລີງໄດ້ຟັງດັ່ງນັ້ນ ຈຶ່ງໄດ້ກ່າວວ່າ)

[໘໑] ນີ້ເພື່ອນ ທ່ານສັນເສີນຂ້າພະເຈົ້າ
ຜູ້ມີປົກກະຕິຫຼອກຫຼົກດ້ວຍຄຳບໍ່ຈິງເລີຍ
ທ່ານໄດ້ຍິນຫຼືໄດ້ເຫັນລີງຕົວໃດແດ່ທີ່ມີໃບໜ້າງາມ

[໘໔] ນີ້ໝົ່ງ ການທີ່ທ່ານເຂົ້າໄປສູ່ຮ້ານຂາຍເຂົ້າເປືອກເມົາແລ້ວ
ຄຽນຕີຂ້າພະເຈົ້າຜູ້ຫິວໂຫຍ ຍັງຝັງໃຈຂ້າພະເຈົ້າຢູ່ຈົນທຸກວັນນີ້

[໗໓] ຂ້າພະເຈົ້າເມື່ອຣະນຶກເຖິງການນອນອັນເປັນທຸກນັ້ນຢູ່
ເຖິງແມ່ນທ່ານຈະໃຫ້ຄອງຣາດຊະສົມບັດ ແລ້ວຂໍພາກມ່ວງກໍບໍ່ຍອມໃຫ້
ຍ້ອນຂ້າພະເຈົ້າຖືກທ່ານຄຸກຄາມເປັນຕາຢ້ານເຊັ່ນນັ້ນ

[໗໔] ນັກປາດຄວນຜູກຄວາມເປັນເພື່ອນມິດໄມຕີກັບຄົນຜູ້ທີ່ຕົນຮູ້ວ່າ
ມີຊາດຕະກູນ ມີຄວາມອີ່ມໃນຄັນ໑ ບໍ່ຂີ້ຖີ່

**ອະຫິຕຸນທິກະຊາດົກທີ ໔ ຈົບ**

## ໕. ຄຸມພິຍະຊາດົກ (໓໕໕)
## ວ່າດ້ວຍຍັກຄຸມພິຍະ

(ພຣະສາດສະດາຊົງນໍາອະດີດນິທານມາແລ້ວຕັດວ່າ)

[໗໔] ຍັກຄຸມພິຍະ ເມື່ອສະແຫວງຫາເຫຍື່ອໄດ້ວາງຢາພິດ
ອັນມີສີ ຣົດ ແລະກິ່ນເໝືອນນໍ້າເຜີ້ງໄວ້ໃນປ່າ

[໗໕] ເຫຼົ່າຊົນຜູ້ເຂົ້າໃຈວ່າ ເປັນນໍ້າເຜີ້ງ ໄດ້ຊີມຢາພິດເຂົ້າໄປ
ຢາພິດນັ້ນອອກລິດແຮງກ້າແກ່ພວກເຂົາ
ພວກເຂົາຈຶ່ງເຖິງຄວາມຕາຍຍ້ອນຢາພິດນັ້ນ

[໗໖] ສ່ວນເຫຼົ່າຊົນທີ່ພິຈາລະນາເຫັນວ່າ ນັ້ນຄືຢາພິດ
ແລ້ວງົດເວັ້ນສາກໍຢູ່ເປັນສຸກ ປາສະຈາກທຸກ
ຂະນະທີ່ພວກອື່ນທຸຣົນທຸຣາຍ ຖືກຢາພິດເຜົາຜານ

[໗໗] ການທັງຫຼາຍທີ່ຝັງຢູ່ໃນໝູ່ມະນຸດ
ບັນດິດເພິ່ງຮູ້ແນວນີ້ວ່າ ເປັນພິດ
ການນັ້ນເປັນທັງເຫຍື່ອເປັນທັງເຄື່ອງຜູກ
ຖໍ້າທີ່ອາໄສຄືຮ່າງກາຍຕົກຢູ່ໃນອໍານາດຂອງມັດຈຸຣາດ

[໗໘] ບັນດິດທັງຫຼາຍຜູ້ກະສັບກະສ່າຍຍ່ອມງົດເວັ້ນ
ການທັງຫຼາຍອັນເປັນເຄື່ອງບໍາເລີກິເລດເຫຼົ່ານີ້ໄດ້ທຸກເມື່ອແນວນີ້
ຍ່ອມລ່ວງພົ້ນເຄື່ອງຂ້ອງໃນໂລກໄດ້

**ຄຸມພິຍະຊາດົກທີ ໕ ຈົບ**

## ໗. ສາລິຍະຊາດົກ (໓໖໗)
## ວ່າດ້ວຍລູກນົກສາລິກາ

(ພຣະໂພທິສັດສະແດງທຳແກ່ບໍລິສັດຜູ້ປະຊຸມກັນຢູ່ວ່າ)

[໖໐] ຜູ້ໃດລວງເຮົາໃຫ້ຈັບງູເຫົ່າດ້ວຍຄຳວ່າ ນີ້ລູກນົກສາລິກາ
ຜູ້ນີ້ພ່ຳສອນແຕ່ສິ່ງທີ່ຊົ່ວ ຖືກງູນັ້ນກັດຕາຍ

[໖໑] ນໍຣະຊົນໃດຕ້ອງການຈະຂ້າຄົນທີ່ບໍ່ໄດ້ທຸບຕີຕົນ
ແລະຄົນທີ່ບໍ່ໄດ້ໃຊ້ໃຫ້ຜູ້ອື່ນທຸບຕີຕົນ
ນໍຣະຊົນນັ້ນຍ່ອມຖືກຂ້າໃຫ້ນອນຕາຍເໝືອນຊາຍຄົນນີ້ທີ່ຖືກງູກັດຕາຍ

[໖໒] ນໍຣະຊົນໃດຕ້ອງການຈະຂ້າຄົນທີ່ບໍ່ໄດ້ຂ້າຕົນ
ແລະຄົນທີ່ບໍ່ໄດ້ໃຊ້ໃຫ້ຜູ້ອື່ນຂ້າຕົນ
ນໍຣະຊົນນັ້ນຍ່ອມຖືກຂ້າໃຫ້ນອນຕາຍເໝືອນຊາຍຄົນນີ້ທີ່ຖືກງູກັດຕາຍ

[໖໓] ຄົນຊັດຝຸ່ນເຕັມກຳມືທວນລົມ
ຝຸ່ນນັ້ນຍ່ອມກັບມາກະທົບເຂົານັ້ນເອງ
ເໝືອນຊາຍຄົນນີ້ທີ່ຖືກງູກັດຕາຍ

[໖໔] ຜູ້ໃດປະທຸດສະຮ້າຍນໍຣະຊົນຜູ້ບໍ່ປະທຸດສະຮ້າຍ
ຜູ້ບໍລິສຸດ ຜູ້ບໍ່ມີຄວາມຜິດ
ບາບຍ່ອມກັບມາເຖິງຄົນຜູ້ໂງ່ຈ້ານັ້ນເອງເໝືອນຝຸ່ນທຸລີທີ່ຄົນຊັດທວນລົມ

**ສາລິຍະຊາດົກທີ ໗ ຈົບ**

## ໘. ຕະຈະສາຣະຊາດົກ (໓໖໘)
## ວ່າດ້ວຍຂື່ຄາໄມ້ໄຜ່

(ພຣະຣາຊາຊົງເຫັນເດັກເຫຼົ່ານັ້ນບໍ່ຢ້ານທັງຍັງມີໃຈຮ່າເຣິງ ຈຶ່ງຕັດຖາມວ່າ)

[໖໕] ພວກເຈົ້າຕົກຢູ່ໃນເງື້ອມມືຂອງສັດຕູ
ຖືກຈອງຈຳດ້ວຍຂື່ຄາທີ່ເຮັດດ້ວຍລຳໄມ້ໄຜ່ ຍັງມີໜ້າຜ່ອງໃສ

ຍ້ອນເຫດໃດ ພວກເຈົ້າຈຶ່ງບໍ່ເສົ້າໂສກ

(ພຣະໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງໄດ້ກ່າວວ່າ)

[໙໖] ຄວາມເສົ້າໂສກແລະຄວາມພິໄຮລຳພັນ
ບໍ່ໄດ້ປະໂຫຍດເລີຍແມ່ນແຕ່ເລັກໜ້ອຍ
ຄົນທີ່ເສົ້າໂສກເປັນທຸກ ສັດຕູຮູ້ເຂົ້າແລ້ວຍ່ອມພໍໃຈ

[໙໗] ສ່ວນຄົນຜູ້ເປັນບັນດິດຮູ້ຫຼັກໃນການພິຈາລະນາອັດຖະ
ຍ່ອມບໍ່ສະທົກສະທ້ານຍ້ອນອັນຕະລາຍໃນການໃດ ໆ
ເຂົາມີໃບໜ້າບໍ່ປ່ຽນແປງ ຍັງຄືເກົ່າ
ສັດຕູເຫັນເຂົ້າແລ້ວຍ່ອມເປັນທຸກ

[໙໘] ບຸກຄົນເພິ່ງໄດ້ປະໂຫຍດໃນບ່ອນໃດດ້ວຍປະການໃດ ໆ
ຄື ດ້ວຍການຈົ່ມມົນ ດ້ວຍການເປີກສາກັບບັນດິດ
ດ້ວຍຄຳອັນເປັນສຸພາສິດ ດ້ວຍການໃຫ້ສິນຈ້າງຮາງວັນ
ຫຼືດ້ວຍປະເພນີ ເພິ່ງພາກພຽນພະຍາຍາມ
ເຮັດປະໂຫຍດໃນບ່ອນນັ້ນດ້ວຍປະການນັ້ນ ໆ

[໙໙] ອັນໜຶ່ງ ໃນການໃດບັນດິດຮູ້ວ່າ
ປະໂຫຍດນີ້ເຮົາຫຼືບຸກຄົນອື່ນບໍ່ເພິ່ງໄດ້ຮັບ
ແມ່ນໃນການນັ້ນບັນດິດກໍບໍ່ຄວນເສົ້າໂສກ ເພິ່ງອົດກັ້ນ
ດ້ວຍຄິດສາວ່າ ກຳເປັນຂອງໝັ້ນຄົງ ບັດນີ້ ເຮົາຈະເຮັດຫຍັງໄດ້

**ຕະຈະສາຣະຊາດົກທີ ໘ ຈົບ**

## ໙. ມິດຕະວິນທຸກະຊາດົກ (໓໖໙)
## ວ່າດ້ວຍນາຍມິດຕະວິນທຸກະ

(ນາຍມິດຕະວິນທຸກະເຫັນເທບພະບຸດໂພທິສັດນັ້ນ ຈຶ່ງຖາມວ່າ)

[໑໐໐] ຂ້າພະເຈົ້າໄດ້ເຮັດຫຍັງໄວ້ແກ່ເຫຼົ່າເທວະດາ
ຂ້າພະເຈົ້າໄດ້ທຳຄວາມຊົ່ວອັນໃດໄວ້
ກົງຈັກນີ້ຈຶ່ງໄດ້ປັກຢູ່ເທິງຫົວແລ້ວພັດຜັນຢູ່ເທິງຂະໝ່ອມຂອງຂ້າພະເຈົ້າ

(ເທບພະບຸດໂພທິສັດກ່າວວ່າ)

[໑໐໑] ຍ້ອນເຫດອັນໃດນໍ?
ທ່ານລ່ວງເລີຍຜາສາດແກ້ວຜຼຶກ
ຜາສາດເງິນ ຜາສາດແກ້ວມະນີ
ແລະຜາສາດຄຳ ແລ້ວມາໃນທີ່ນີ້

(ນາຍມິດຕະວິນທຸກະກ່າວວ່າ)

[໑໐໔] ຂໍທ່ານຈົ່ງເບິ່ງຂ້າພະເຈົ້າຜູ້ເຖິງຄວາມຫາຍະນະ
ຍ້ອນຄວາມສຳຄັນນີ້ວ່າ
ໃນທີ່ນີ້ໂພຄະທັງຫຼາຍເຫັນຈະ
ມີຫຼາຍກວ່າຜາສາດທັງ ໔ ຫຼັງນີ້

(ເທບພະບຸດໂພທິສັດກ່າວວ່າ)

[໑໐໕] ທ່ານເມື່ອມີຄວາມປາຖະໜາຫຼາຍເກີນໄປ
ໄດ້ຄອບຄອງນາຣີ ໔ ນາງ ບໍ່ພໍໃຈນາງທັງ ໔
ໄດ້ຄອບຄອງນາຣີ ໘ ນາງ ບໍ່ພໍໃຈນາງທັງ ໘
ໄດ້ຄອບຄອງນາຣີ ໑໖ ນາງ ບໍ່ພໍໃຈນາງທັງ ໑໖
ໄດ້ຄອບຄອງນາຣີ ໓໔ ນາງ ບໍ່ພໍໃຈນາງທັງ ໓໔
ຈຶ່ງໄດ້ປະສົບກົງຈັກ
ກົງຈັກຈຶ່ງພັດຜັນຢູ່ທີ່ຫົວຂອງທ່ານ
ຜູ້ຖືກຄວາມປາຖະໜາຫຼາຍເກີນໄປກຳຈັດແລ້ວ
[໑໐໔] ຂຶ້ນຊື່ວ່າຄວາມຢາກ
ມີສະພາບແຜ່ໄປຍິ່ງໃຫຍ່ໄພສານ
ເຮັດໃຫ້ເຕັມໄດ້ຍາກ
ກໍຊົນເຫຼົ່າໃດກຳໜັດຕາມຄວາມຢາກ
ຊົນເຫຼົ່ານັ້ນຈຶ່ງຕ້ອງແບກກົງຈັກໄວ້

**ມິດຕະວິນທຸກະຊາດົກທີ ໗ ຈົບ**

# ໑໐. ປະລາສະຊາດົກ (໓໗໐)

## ວ່າດ້ວຍປະລາສະເທວະດາ

(ພະຍາຫົງເປີກສາກັບປະລາສະເທວະດາວ່າ)

[໑໐໕] ພະຍາຫົງໄດ້ກ່າວກັບປະລາສະເທວະດາວ່າ
ນີ້ເພື່ອນ ຕົ້ນໄຮງອກຕິດຢູ່ທີ່ຄ່າກົບຂອງທ່ານ
ມັນງອກຂຶ້ນເພື່ອຈະຕັດສິ່ງອັນເປັນທີ່ຮັກຂອງທ່ານ

(ປະລາສະເທວະດາບໍ່ເຊື່ອຄຳຂອງພະຍາຫົງ ຈຶ່ງກ່າວວ່າ )

[໑໐໖] ຕົ້ນໄຮຈົ່ງຈະເລີນເຕີບໂຕຂຶ້ນເທີ້ນ
ຂ້າພະເຈົ້າຈະເປັນບ່ອນເພິ່ງຂອງຕົ້ນໄຮນັ້ນເໝືອນບິດາແລະມານດາ
ແລະຕົ້ນໄຮນັ້ນຈະເປັນບ່ອນເພິ່ງຂອງຂ້າພະເຈົ້າຄືກັນ

(ພະຍາຫົງກ່າວວ່າ)

[໑໐໗] ຍ້ອນເຫດໃດ ທ່ານຈຶ່ງປ່ອຍໃຫ້ຕົ້ນໄມ້ທີ່ເປັນຕາຍ້ານດັ່ງຂ້າເສິກ
ຈະເລີນເຕີບໂຕທີ່ຄ່າຄົບ ເຫດນັ້ນ ຂ້າພະເຈົ້າຈະຂໍເຕືອນທ່ານແລ້ວຈະໄປ
ການຈະເລີນເຕີບໂຕຂອງຕົ້ນໄຮນັ້ນ ຂ້າພະເຈົ້າບໍ່ເຫັນດ້ວຍ

(ຕໍ່ມາຣຸກຂະເທວະດານັ້ນຄ່ຳຄວນຢູ່ວ່າ)

[໑໐໘] ບັດນີ້ ໄຮຕົ້ນນີ້ແລ ເຮັດໃຫ້ເຮົາຍ້ານກົວ
ເພາະບໍ່ເຊື່ອຟັງຄຳຂອງພະຍາຫົງ
ເຊິ່ງເປັນຄຳເວົ້າອັນສຳຄັນປານວ່າຂຸນເຂົາສິເນຣຸຣາດ
ໄພອັນໃຫຍ່ຫຼວງຈຶ່ງມາເຖິງເຮົາແລ້ວ

(ພຣະສຳມາສຳພຸດທະເຈົ້າຕັດພຣະຄາຖາວ່າ)

[໑໐໙] ຜູ້ໃດເມື່ອຈະເລີນຂຶ້ນກັບກັດກິນທີ່ເພິ່ງອາໄສຂອງຕົນ
ຄວາມຈະເລີນຂອງຜູ້ນັ້ນຜູ້ສະຫຼາດບໍ່ສັນເສີນ
ນັກປາດຮັງກຽດຄວາມພິນາດ
ຈຶ່ງພະຍາຍາມກຳຈັດຮາກເຫງົ້າຂອງອັນຕະລາຍນັ້ນ

**ປະລາສະຊາດົກທີ ໑໐ ຈົບ**

**ອັນນາໂຣຫະວັກທີ ໔ ຈົບ**

# ໓. ອັດທະວັກ
## ໝວດວ່າດ້ວຍຊາດົກມີເຄິ່ງວັກ

## ໑. ທິຕິຕິໂກສົນຊາດົກ (໓໗໑)
## ວ່າດ້ວຍພຣະເຈົ້າທີຕິຕິໂກສົນ

(ທີຄາວຸກຸມານຊົງຣະນຶກເຖິງໂອວາດທີ່ພຣະຣາດຊະມານດາ ແລະພຣະຣາດຊະບິດາປະທານໄວ້ແລ້ວ ຈຶ່ງຂາບທູນພຣະເຈົ້າພົມມະທັດວ່າ)

[໑໑໐] ຂ້າແດ່ ມະຫາຣາດ ເມື່ອພຣະອົງ
ຕົກຢູ່ໃນອຳນາດຂອງຂ້າພຣະອົງຢູ່ຢ່າງນີ້
ເຫດທີ່ຈະປົດທຸກໃຫ້ພຣະອົງໄດ້ມີຢູ່ບໍ ຂ້ານ້ອຍ?

(ພຣະຣາຊາຕັດຄາຖາວ່າ)

[໑໑໑] ທ້າວເອີຍ ເມື່ອເຮົາຕົກຢູ່ໃນອຳນາດຂອງທ່ານຢ່າງນີ້
ເຫດບາງຢ່າງທີ່ຈະປົດທຸກໃຫ້ເຮົາໄດ້ບໍ່ມີ

(ພຣະໂພທິສັດຂາບທູນວ່າ)

[໑໑໒] ຂ້າແດ່ມະຫາຣາດ ເວັ້ນຄວາມສຸຈະຣິດ
ແລະຄຳເວົ້າອັນເປັນສຸພາສິດສາແລ້ວ
ເຫດອື່ນທີ່ຈະຕ້ານທານໃນເວລາທີ່ຈະຕາຍ ຂ້າພຣະອົງບໍ່ເຫັນເລີຍ
ຊັບສົມບັດນອກນີ້ກໍຄືກັນ

[໑໑໓] ຊົນເຫຼົ່າໃດເຂົ້າໄປຜູກເວນວ່າ ຄົນນີ້ໄດ້ດ່າເຮົາ
ໄດ້ຂ້າເຮົາ ໄດ້ຊະນະເຮົາ ແລະໄດ້ລັກສິ່ງຂອງຂອງເຮົາໄປ
ເວນຂອງຊົນເຫຼົ່ານັ້ນຍ່ອມບໍ່ສະງົບຣະງັບ

[໑໑໔] ສ່ວນຊົນເຫຼົ່າໃດບໍ່ເຂົ້າໄປຜູກເວນວ່າ ຄົນນີ້ໄດ້ດ່າເຮົາ
ໄດ້ຂ້າເຮົາ ໄດ້ຊະນະເຮົາ ແລະໄດ້ລັກສິ່ງຂອງຂອງເຮົາໄປ
ເວນຂອງຊົນເຫຼົ່ານັ້ນຍ່ອມສະງົບຣະງັບ

[໑໑໕] ເພາະວ່າໃນການໃດ ໆ ເວນທັງຫຼາຍໃນໂລກນີ້

ຍ່ອມບໍ່ສະງົບຣະງັບດ້ວຍເວນ ແຕ່ເວນທັງຫຼາຍ
ຍ່ອມສະງົບຣະງັບດ້ວຍການບໍ່ຈອງເວນ ນີ້ເປັນທຳເກົ່າ

**ທິຕິຕິໂກສົນຊາດົກທີ ໑ ຈົບ**

## ໔. ມິຕະໂປຕະກະຊາດົກ (໓໗໔)

## ວ່າດ້ວຍລູກເນື້ອ

(ທ້າວສັກກະເທວະຣາດທອດພຣະເນດດາບົດຮ້ອງໄຫ້ຄ່ຳຄວນ ຈຶ່ງສະເດັດມາຢືນຢູ່ໃນອາກາດ ຕັດວ່າ)

[໑໑໖] ການທີ່ທ່ານຜູ້ລະການຄອງເຮືອນບວດເປັນສະມະນະ
ເສົ້າໂສກເຖິງລູກເນື້ອທີ່ຕາຍໄປແລ້ວນັ້ນ
ເປັນການບໍ່ສົມຄວນ

(ດາບົດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໑໗] ທ້າວສັກກະ ຍ້ອນການຢູ່ຮ່ວມກັນແລ
ຄວາມຮັກຈຶ່ງເກີດໃນຫົວໃຈຂອງມະນຸດຫຼືຂອງເນື້ອ
ອາດຕະມາຈຶ່ງບໍ່ສາມາດທີ່ຈະບໍ່ເສົ້າໂສກເຖິງລູກເນື້ອນັ້ນໄດ້

(ທ້າວສັກກະຕັດວ່າ)

[໑໑໘] ຊົນເຫຼົ່າໃດຮ້ອງໄຫ້ ຈົ່ມເພີ້ ລຳພັນ
ເຖິງຄົນທີ່ຕາຍແລ້ວແລະຄົນທີ່ກຳລັງຈະຕາຍ
ສັດຕະບຸຣຸດທັງຫຼາຍກ່າວການຮ້ອງໄຫ້ວ່າເປົ່າປະໂຫຍດ
ທ່ານລືສີ ເພາະສະນັ້ນ ທ່ານຢ່າຮ້ອງໄຫ້ໄປເລີຍ

[໑໑໙] ພາມ ສັດທີ່ຕາຍລະໂລກນີ້ໄປແລ້ວ
ຈະເພິ່ງລຸກຂຶ້ນໄດ້ຍ້ອນການຮ້ອງໄຫ້
ເຮົາທຸກຄົນກໍຄົງມາປະຊຸມກັນ
ຮ້ອງໄຫ້ເຖິງໝູ່ຍາດຂອງກັນແລະກັນ

(ດາບົດກ່າວສະດຸດີທ້າວສັກກະວ່າ)

[໑໒໐] ພຣະອົງຊ່ອຍຣະງັບອາດຕະມາຜູ້ຮ້ອນຮົນໃຫ້ສະງົບ

ດັບຄວາມກະວົນກະວາຍທັງໝົດໄດ້
ເໝືອນຄົນເອົານໍ້າຫົດດັບໄຟທີ່ໄໝ້ນໍ້າມັນປຽງ

[໑໔໑] ພຣະອົງໄດ້ບັນເທົາຄວາມເສົ້າໂສກເຖິງບຸດຂອງອາດຕະມາ
ຜູ້ກຳລັງເສົ້າໂສກຊື່ວ່າໄດ້ຊ່ອຍຖອນລູກສອນຄືຄວາມເສົ້າໂສກ
ເຊິ່ງສຽບປັກຫົວໃຈຂອງອາດຕະມາຂຶ້ນໄດ້ແລ້ວນໍ

[໑໔໔] ທ້າວວາສະວະ ອາດຕະມາເຊິ່ງພຣະອົງໄດ້ຊ່ອຍຖອນລູກສອນ
ຄືຄວາມເສົ້າໂສກຂຶ້ນໄດ້ແລ້ວເປັນຜູ້ປາສະຈາກຄວາມເສົ້າໂສກ
ບໍ່ມີຄວາມຂຸ່ນມົວ ຈຶ່ງບໍ່ເສົ້າໂສກ ບໍ່ຮ້ອງໄຫ້
ຍ້ອນໄດ້ຟັງຄຳຂອງພຣະອົງ

## ໓. ມູສິກະຊາດົກ (໓໗໓)
## ວ່າດ້ວຍໜູຖືກຂ້າຕາຍ

(ເວລາຈະໄປສະໂບກຂະຣະນີເພື່ອອາບນໍ້າ ພຣະຣາຊາຕັດວ່າ)

[໑໔໓] ຄົນຈົ່ມເພີ້ຢູ່ວ່າ ນາງໜູໄປໃສ ໄປບ່ອນໃດແລ້ວ
ເຮົາຄົນດຽວທີ່ນັ້ນຮູ້ວ່າ ນາງໜູຖືກຂ້າຢູ່ໃນນໍ້າສ້າງ

(ເວລາສະເດັດເຂົ້າໄປສູ່ຜາສາດ ພຣະຣາຊາສະເດັດດຳເນີນສາທະຍາຍໄປວ່າ)

[໑໔໔] ເຫດທີ່ເຈົ້າຫຽວແນມຂ້າງນັ້ນຂ້າງນີ້ໄປມາເໝືອນລາ
ເຮັດໃຫ້ເຮົາຮູ້ວ່າ ເຈົ້າຂ້ານາງໜູທີ່ນໍ້າສ້າງແລ້ວ
ຍັງປາຖະໜາຈະກິນພຣະເຈົ້າຍະວະອີກ

(ພຣະຣາຊາສະເດັດດຳເນີນທ່ອງຈົ່ມຈົ່ມເຖິງຫົວຂັ້ນໄດວ່າ)

[໑໔໕] ນີ້ເຈົ້າໂງ່ ເຈົ້າຍັງເປັນເດັກນ້ອຍຫຼາຍ ຍັງເປັນໄວລຸ້ນຢູ່
ມາຢືນຖືທ່ອນໄມ້ຍາວ ເຮົາຈັກບໍ່ຍອມໃຫ້ຊີວິດແກ່ເຈົ້າດອກ

(ພຣະຣາຊາລອດພົ້ນຈາກຄວາມຕາຍ ຊົງຮ່າເຣີງຍິນດີ ຊົງເປ່ງອຸທານວ່າ)

[໑໔໖] ເຮົາຜູ້ຖືກບຸດປອງຂ້າ ລອດພົ້ນຈາກຄວາມຕາຍ
ຍ້ອນຢູ່ເທິງວິມານໃນອາກາດກໍຫາບໍ່ໄດ້
ຍ້ອນບຸດສຸດທີ່ຮັກສະເໜີດ້ວຍອະໄວຍະວະກໍຫາບໍ່ໄດ້
ແຕ່ເຮົາພົ້ນຈາກຄວາມຕາຍຍ້ອນຄາຖາທີ່ອາຈານຜູກໃຫ້

[໑໘໗] ບຸກຄົນຄວນຮຽນສູດທຸກຢ່າງ
ບໍ່ວ່າຈະເປັນຊັ້ນຕໍ່າ ຊັ້ນສູງ ຫຼືປານກາງ
ແລະຄວນຮູ້ຈຸດມຸ້ງໝາຍຂອງວິຊາທຸກຢ່າງ
ແຕ່ວ່າບໍ່ຄວນໃຊ້ວິຊາທຸກຢ່າງ
ເວລາທີ່ສູດເຊິ່ງໄດ້ສຶກສາມາແລ້ວນຳປະໂຫຍດມາໃຫ້ກໍຍັງມີຢູ່

**ມູສິກະຊາດົກທີ ໙ ຈົບ**

## ໔. ຈູລະທະນຸກຄະຫະຊາດົກ (໙໗໔)
## ວ່າດ້ວຍຈູລະທະນຸກຄະຫະບັນດິດ

(ພັນລະຍາຂອງຈູລະທະນຸກຄະຫະບັນດິດກ່າວກັບນາຍໂຈນວ່າ)

[໑໘໘] ພາມ ທ່ານຖືເອົາຫໍ່ເຄື່ອງປະດັບທັງໝົດຂ້າມຝັ່ງໄປແລ້ວ
ຈົ່ງຮີບກັບມາຮັບເຮົາຂ້າມໄປຈາກຝັ່ງນີ້ໂດຍໄວໃນບັດນີ້

(ນາຍໂຈນໄດ້ຟັງດັ່ງນັ້ນຢືນຢູ່ທີ່ຝັ່ງນັ້ນກ່າວວ່າ)

[໑໘໙] ນາງຜູ້ຈະເລີນໄດ້ປ່ຽນເອົາເຮົາຜູ້ບໍ່ເຄີຍເຊີຍຊິດ
ກັບຊາຍຜູ້ເຄີຍເຊີຍຊິດກັນມານານ
ນາງຜູ້ຈະເລີນຄົງຈະປ່ຽນເອົາຊາຍອື່ນຜູ້ບໍ່ແມ່ນຂາປະຈຳ
ກັບເຮົາຜູ້ເປັນຂາປະຈຳແນ່ນອນ ເຮົາຈະໄປຈາກບ່ອນນີ້ໃຫ້ໄກແສນໄກ

(ໝາຈອກໄດ້ຟັງດັ່ງນັ້ນ ຈຶ່ງໄດ້ກ່າວວ່າ)

[໑໙໐] ນີ້ໃຜຫົວສຽງດັງລັ່ນຢູ່ທີ່ພຸ່ມຕະໄຄ່ນ້ຳ
ບ່ອນນີ້ບໍ່ມີການຟ້ອນລຳ ຂັບຮ້ອງ ຕົບມື ປະໂຄມດົນຕີ
ນາງຜູ້ມີສະໂພກອັນ ຜຶ່ງຜາຍ ງົດງາມ
ເຫດໃດນໍ ໃນເວລາທີ່ຄວນຮ້ອງໄຫ້ ເຈົ້າກັບຫົວ

(ພັນລະຍາຂອງຈູລະທະນຸກຄະຫະບັນດິດກ່າວວ່າ)

[໑໙໑] ນີ້ໝາຈອກຜູ້ຕ່ຳຊາມ ໂງ່ຈ້ຳ ເຈົ້າມີປັນຍາໜ້ອຍ
ເສື່ອມສິ້ນທັງປາທັງຕ່ອນຊີ້ນແລ້ວຊຶບເຊົາຢູ່ເໝືອນຄົນກຳພ້າ

(ໝາຈອກກ່າວວ່າ)

[໑໓໘] ໂທດຂອງຜູ້ອື່ນເຫັນໄດ້ງ່າຍ
ສ່ວນໂທດຂອງຕົນເຫັນໄດ້ຍາກ
ເຈົ້ານັ້ນແລເສື່ອມສິ້ນທັງຜົວທັງຊາຍຊູ້
ຍ່ອມຊິບເຊົາຍິ່ງກວ່າເຮົາສາອີກ

(ພັນລະຍາຂອງຈູລະທະນຸກຄະທະບັນດິດກ່າວວ່າ)

[໑໓໓] ພະຍາເນື້ອຜູ້ຕ່ຳຊາມ ເລື້ອງນີ້ຈິງດັ່ງທີ່ທ່ານເວົ້າ
ເຮົານັ້ນໄປຈາກບ່ອນນີ້ແລ້ວ ຈັກຢູ່ໃນອຳນາດຂອງຜົວຢ່າງດຽວ

(ທ້າວສັກກະເທວະຣາດສະດັບຄຳຂອງນາງຜູ້ທຸສີນຂາດອາຈາຣະຈຶ່ງຕັດວ່າ)

[໑໓໔] ຜູ້ໃດລັກຖາດດິນໄປໄດ້ ເຖິງຖາດສຳຣິດຜູ້ນັ້ນກໍລັກໄປໄດ້
ບາບທີ່ເຈົ້າໄດ້ທຳແລ້ວນັ້ນແລ
ເຈົ້າກໍຈັກຕ້ອງເຮັດມັນອີກ

**ຈູລະທະນຸກຄະທະຊາດົກທີ ໔ ຈົບ**

## ໕. ກະໂປຕະກະຊາດົກ (໓໗໕)
## ວ່າດ້ວຍນົກກາງແກໂພທິສັດ

(ກາຄິດຈະກິນປາ ຈຶ່ງກ່າວວ່າ)

[໑໓໕] ບັດນີ້ແລເຮົາສະບາຍແລ້ວ ບໍ່ມີພະຍາດ
ໝົດສ້ຽນໜາມ ນົກກາງແກກໍບິນອອກໄປແລ້ວ
ບັດນີ້ ເຮົາຈະເຮັດຕາມຄວາມພໍໃຈ
ເພາະວ່າຊີ້ນແລະຜັກທີ່ເຫຼືອຈະເຮັດໃຫ້ເຮົາມີກຳລັງ

(ນົກກາງແກກັບມາເຫັນກາຖືກລົກຂົນທາດ້ວຍນ້ຳມັນປຽງເນີ່າ ຈຶ່ງເຍີ້ຍຫຍັນວ່າ)

[໑໓໖] ນົກຍາງແມ່ນຫຍັງ ມີຫອນ ເປັນໂຈນ ມີເມກເປັນລຸງ
ແມ່ນົກຍາງ ເຈົ້າຈິ່ງລົງມາຂ້າງລຸ່ມນີ້ເທີ້ນ
ກາສະຫາຍຂອງເຮົາເປັນສັດດຸຮ້າຍ

(ກາໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໓໗] ທ່ານຢ່າຫິວຂວັນ
ເພາະເຫັນຂ້າພະເຈົ້າຖືກລູກຊາຍພໍ່ຄົວລັກຂັບ
ແລ້ວທາດ້ວຍຜົງເມັດຜັກກາດ
ຜະສົມກາກປຽງແນວນີ້ເລີຍ

(ນົກກາງແກເຍີ້ຍຫຍັນຢູ່ວ່າ)

[໑໓໘] ທ່ານອາບນໍ້າຊໍາຣະກາຍດີແລ້ວ
ລູບໄລ້ທາດ້ວຍຂອງຫອມດີແລ້ວ
ອີ່ມໜໍາສໍາຣານດ້ວຍເຂົ້າແລະນໍ້າ
ແລະທີ່ຄໍຂອງທ່ານກໍປະດັບດ້ວຍແກ້ວໄພທູນ
ທ່ານໄດ້ໄປຖິ່ນກະຊັງຄະລະມາບໍ?

(ກາໄດ້ກ່າວວ່າ)

[໑໓໙] ມິດກໍຕາມ ສັດຕູກໍຕາມຂອງທ່ານ
ຢ່າໄດ້ໄປຖິ່ນກະຊັງຄະລະເລີຍ
ເພາະຄົນໃນຖິ່ນກະຊັງຄະລະນັ້ນ
ລັກຂັບແລ້ວຜູກກະເບື້ອງໄວ້ທີ່ຄໍຂອງເຮົາ

(ນົກກາງແກກ່າວວ່າ)

[໑໔໐] ເພື່ອນເອີຍ ເຈົ້າຈັກປະສົບຄວາມຊົ່ວຮ້າຍເຊັ່ນນີ້ອີກ
ເພາະປົກກະຕິຂອງເຈົ້າເປັນເຊັ່ນນັ້ນ
ອາຫານຂອງມະນຸດເປັນຂອງທີ່ນົກບໍ່ຄວນກິນ

**ກະໂປຕະກະຊາດົກທີ ໔ ຈົບ**

**ອັດທະວັກທີ ໓ ຈົບ**

## ລວມຊາດົກທີ່ມີໃນວັນນາໂຣຫະວັກແລະອັດຖະວັກ ຄື

໑. ວັນນາໂຣຫະຊາດົກ
໒. ທີຣິຊາດົກ
໓. ສີລະວີມັງສະຊາດົກ
໔. ຂັດໂຊປະນະກະຊາດົກ

໕. ອະທິຕຸນທິກະຊາດົກ
໖. ຄຸມພິຍະຊາດົກ
໗. ສາລິຍະຊາດົກ
໘. ຕະຈະສາຣະຊາດົກ
໙. ມິດຕະວິນທຸກະຊາດົກ
໑໐. ປະລາສະຊາດົກ
໑໑. ທີຄີຕິໂກສະລະຊາດົກ
໑໒. ມິຄະໂປຕະກະຊາດົກ
໑໓. ມູສິກະຊາດົກ
໑໔. ຈູລະທະນຸກຄະຫະຊາດົກ
໑໕. ກະໂປຕະກະຊາດົກ

## ລວມວັກທີ່ມີໃນນິບາດນີ້ ຄື

໑. ມະນິກຸນທະລະວັກ
໒. ວັນນາໂຣຫະວັກ
໓. ອັດທະວັກ

**ປັນຈະກະນິບາດ ຈົບ**

# ໖. ສັກກະນິບາດ

## ໑. ອະວາຣິຍະວັກ

### ໝວດວ່າດ້ວຍບິດາຂອງນາງອະວາຣິຍະ

### ໑. ອະວາຣິຍະຊາດົກ (໓໗໖)

### ວ່າດ້ວຍບິດາຂອງນາງອະວາຣິຍາ

(ລືສີໂພທິສັດກ່າວສອນພຣະຣາຊາຢູ່ທຸກ ໆ ວັນວ່າ)

[໑] ຂໍຖວາຍພຣະພອນມະຫາບໍພິດຜູ້ເປັນໃຫຍ່ໃນແຜ່ນດິນ
ຂໍພຣະອົງຢ່າຊົງພິໂຣດເລີຍ
ມະຫາບໍພິດຜູ້ເປັນຈອມທັບ ຂໍພຣະອົງຢ່າຊົງພິໂຣດເລີຍ
ພຣະຣາຊາຜູ້ບໍ່ຊົງພິໂຣດຕອບຜູ້ທີ່ໂກດ
ຍ່ອມເປັນທີ່ບູຊາຂອງຊາວແວ່ນແຄວັນ

[໒] ອາດຕະມາພາບພໍ່າສອນໃນທີ່ທຸກສະຖານ
ຄື ທັງໃນໝູ່ບ້ານ ໃນປ່າ ໃນບ່ອນລຸ່ມ ຫຼືໃນບ່ອນໂນນ
ຂໍຖວາຍພຣະພອນມະຫາບໍພິດຜູ້ຈອມທັບ
ຂໍພຣະອົງຢ່າຊົງພິໂຣດເລີຍ

(ພຣະສຳມາສຳພຸດທະເຈົ້າຕັດເຖິງນາຍເຮືອຜູ້ໂງ່ຈ້າວ່າ)

[໓] ທີ່ແມ່ນ້ຳຄົງຄາໄດ້ມີຄົນແຈວເຮືອຈ້າງຊື່ອະວາຣິຍະປິຕາ
ເຂົາຮັບສົ່ງຄົນຂ້າມຟາກກ່ອນແລ້ວຈຶ່ງຂໍຄ່າໂດຍສານພາຍຫຼັງ
ຍ້ອນເຫດນັ້ນ ເຂົາຈຶ່ງມີການຜິດຖຽງວິວາທະກັບຄົນໂດຍສານ
ຈຶ່ງບໍ່ຈະເລີນດ້ວຍໂພຄະທັງຫຼາຍ

(ລືສີໂພທິສັດບອກເຖິງເຫດທີ່ຈະໃຫ້ໂພຄະຈະເລີນແກ່ນາຍເຮືອນັ້ນວ່າ)

[໔] ພໍ່ເຮືອຈ້າງ ທ່ານຈົ່ງຂໍຄ່າໂດຍສານ
ກັບຄົນທີ່ຍັງບໍ່ໄດ້ຂ້າມໄປຝັ່ງນັ້ນກ່ອນ
ຍ້ອນວ່າ ໃຈຂອງຄົນທີ່ຂ້າມຟາກໄປແລ້ວເປັນແນວໜຶ່ງ
ໃຈຂອງຄົນທີ່ຕ້ອງການຈະຂ້າມຟາກເປັນອີກແນວໜຶ່ງ

(ລີສີໂພທິສັດສອນນາຍເຮືອນັ້ນອີກວ່າ)

[໕] ອາດຕະມາພາບພໍ່າສອນໃນທີ່ທຸກສະຖານ
ຄື ທັງໃນໝູ່ບ້ານ ໃນປ່າ ໃນບ່ອນລຸ່ມ ຫຼືໃນບ່ອນໂນນ
ພໍ່ເຮືອຈ້າງ ຂໍທ່ານຢ່າຄຽດເລີຍ

(ພຣະສໍາມາສໍາພຸດທະເຈົ້າຕັດແກ່ພິກຂຸທັງຫຼາຍວ່າ)

[໖] ພຣະຣາຊາໄດ້ພຣະຣາດຊະທານບ້ານສ່ວຍຍ້ອນອະນຸສາສະນີບົດໃດ
ຍ້ອນອະນຸສາສະນີບົດນັ້ນແລ ຄົນແຈວເຮືອຈ້າງຈຶ່ງໄດ້ຮັບປາກ

(ພຣະສໍາມາສໍາພຸດທະເຈົ້າຕັດຂໍ້ຄວາມສຸດທ້າຍວ່າ)

[໗] ຖາດໃສ່ອາຫານກໍຕົກແຕກແລ້ວ ພັນລະຍາກໍຖືກທໍາຮ້າຍ
ແລະເດັກທີ່ເກີດໃນທ້ອງກໍລຸລູກຕົກລົງມາທີ່ພື້ນ
ເຂົາບໍ່ອາດຈະໃຫ້ປະໂຫຍດເກີດຂຶ້ນຈາກໂອວາດນັ້ນໄດ້
ເໝືອນເນື້ອບໍ່ອາດຈະໃຫ້ປະໂຫຍດເກີດຂຶ້ນຈາກຄໍາ

**ອະວາຣິຍະຊາດົກທີ ໑ ຈົບ**

## ໔. ເສຕະເກຕຸຊາດົກ (໓໗໗)
## ວ່າດ້ວຍເສຕະເກຕຸດາບົດ

(ພຣະໂພທິສັດເປັນອາຈານທິສາປາໂມກສອນມານົບເສຕະເກຕຸຜູ້ເປັນຫົວໜ້າ ສິດວ່າ)

[໘] ທ້າວເອີຍ ເຈົ້າຢ່າໂກດ ຍ້ອນຄວາມໂກດບໍ່ດີເລີຍ
ທິດທີ່ເຈົ້າຍັງບໍ່ໄດ້ເຫັນ ຍັງບໍ່ໄດ້ຍິນມີອີກຫຼາຍ
ທ້າວເສຕະເກຕຸ ມານດາບິດາເປັນທິດເບື້ອງໜ້າ
ພຣະອະຣິຍະທັງຫຼາຍກ່າວສັນເສີນອາຈານວ່າເປັນທິດເບື້ອງຂວາ

[໙] ຄະລິຫັດຖວາຍເຂົ້າ ນໍ້າ ແລະຜ້າ ກ່າວນິມົນຜູ້ໃດ
ແມ່ນຜູ້ນັ້ນພຣະອະຣິຍະທັງຫຼາຍຍ່ອມຮຽກວ່າ ເປັນທິດເບື້ອງເທິງ
ເສຕະເກຕຸ ທິດນີ້ເປັນທິດທີ່ປະເສີດ
ເພາະສັດທັງຫຼາຍຜູ້ມີທຸກເຖິງແລ້ວຍ່ອມເປັນສຸກ

(ພຣະຣາຊາຊົງເຫັນດາບົດທັງຫຼາຍພໍ່າເພັງຕະບະຜິດ ຈຶ່ງຕັດສົນທະນາກັບປຸໂຣຫິດວ່າ)

[໑໐]  ຊະດົນເຫຼົ່າໃດນຸ່ງຫົ່ມໜັງສັດທີ່ຊຸຂະ
ມີຂີ້ແຂ້ວເຂິ ຮ່າງກາຍສົກກະປົກ ສາທະຍາຍມົນຢູ່
ຊະດົນເຫຼົ່ານັ້ນປະກອບໜ້າທີ່ວຽກງານຂອງມະນຸດ
ຈະຮູ້ແຈ້ງໂລກນີ້ແລ້ວພົ້ນຈາກອະບາຍໄດ້ບໍ?

(ປຸໂຣຫິດຂາບທູນວ່າ)

[໑໑]  ຂໍເດຊະພຣະຣາຊາ ຫາກບຸກຄົນເຖິງຈະເປັນພະຫູສູດ
ທຳແຕ່ກຳຊົ່ວ ກໍຊື່ວ່າບໍ່ປະພຶດທຳ
ເຂົາແມ່ນຈະມີພຣະເວດຕັ້ງພັນ ອາໄສຄວາມເປັນພະຫູສູດນັ້ນ
ແຕ່ບໍ່ບັນລຸຈະຣະນະທຳ ກໍພົ້ນຈາກທຸກບໍ່ໄດ້

(ເສຕະເກຕຸດາບົດກ່າວກັບປຸໂຣຫິດນັ້ນວ່າ)

[໑໔]  ບຸກຄົນແມ່ນຈະມີພຣະເວດຕັ້ງພັນ ອາໄສຄວາມເປັນພະຫູສູດນັ້ນ
ແຕ່ບໍ່ບັນລຸຈະຣະນະທຳ ກໍພົ້ນຈາກທຸກບໍ່ໄດ້
ອາດຕະມາເຂົ້າໃຈວ່າ ພຣະເວດທັງຫຼາຍເປັນສິ່ງທີ່ຂາດຜົນ
ຈະຣະນະທຳພ້ອມທັງຄວາມສັງລວມທີ່ນັ້ນເປັນສັດຈະ

(ປຸໂຣຫິດໄດ້ກ່າວວ່າ)

[໑໕]  ພຣະເວດທັງຫຼາຍຈະຂາດຜົນກໍບໍ່ແມ່ນ
ຈະຣະນະທຳພ້ອມທັງຄວາມສັງລວມທີ່ນັ້ນເປັນສັດຈະ
ເພາະບຸກຄົນບັນລຸພຣະເວດທັງຫຼາຍແລ້ວຍ່ອມໄດ້ກຽດ
ບຸກຄົນຜູ້ເຝິກຕົນດີແລ້ວດ້ວຍຈະຣະນະທຳຍ່ອມບັນລຸຄວາມສະງົບ

**ເສຕະເກຕຸຊາດົກທີ ໔ ຈົບ**

## ໕. ທະຣີມຸຂະຊາດົກ (໕໗໗)
## ວ່າດ້ວຍພຣະທະຣີມຸຂະປັດເຈກພຸດທະເຈົ້າ

(ພຣະປັດເຈກພຸດທະເຈົ້າສະແດງທຳໂຜດພຣະເຈົ້າພົມມະທັດວ່າ)

[໑໔]  ກາມທັງຫຼາຍເໝືອນເປືອກຕົມ ເໝືອນຫຼົ່ມ
ກໍໄພນີ້ບັນດິດທັງຫຼາຍກ່າວວ່າ ເປັນມູນເຫດແຫ່ງໄພ ໓ ປະການ

ກາມທັງຫຼາຍຄືທຸລີແລະຄວັນ ອາດຕະມາພາບກໍໄດ້ປະກາດໄວ້ແລ້ວ
ຂໍຖວາຍພຣະພອນ ພຣະເຈົ້າພິມມະທັດ
ຂໍມະຫາບໍພິດຊົງລະການເຫຼົ່ານີ້ອອກບວດເທີ້ນ

(ພຣະຣາຊາເມື່ອຊົງສະດັບດັ່ງນັ້ນແລ້ວ ຕັດບອກຄວາມທີ່ພຣະອົງພົວພັນດ້ວຍກິເລດວ່າ)

[໑໘] ທ່ານພາມ ຂ້ານ້ອຍກຳໜັດຍິນດີ
ແລະມີກມຸ່ນຢູ່ໃນການທັງຫຼາຍ
ປະສົງຈະມີຊີວິດຢູ່ແນວນີ້
ຈຶ່ງບໍ່ອາດຈະລະການອັນໜ້າສະພຶງຢ້ານນັ້ນໄດ້
ແຕ່ຂ້ານ້ອຍຈະທຳບຸນທັງຫຼາຍໃຫ້ຫຼາຍ

(ພຣະທະຣິມຸຂະປັດເຈກພຸດທະເຈົ້າຕັດສອນໃຫ້ຍິ່ງ ໆ ຂຶ້ນໄປວ່າ)

[໑໙] ຜູ້ໃດອັນບຸກຄົນຜູ້ຫວັງຄວາມຈະເລີນ
ອະນຸເຄາະດ້ວຍປະໂຫຍດເກື້ອກູນ
ກ່າວສອນຢູ່ ກໍບໍ່ເຮັດນຳຄຳສອນ
ຜູ້ນັ້ນສຳຄັນແຕ່ສິ່ງທີ່ຕົນຍຶດຖືວ່າ ນີ້ທີ່ນັ້ນປະເສີດ
ເປັນຄົນໂງ່ ຍ່ອມເກີດໃນທ້ອງເລື້ອຍໄປ

[໑໗] ເຂົາຍ່ອມເຂົ້າເຖິງນະຮົກອັນເປັນຕາຢ້ານ
ເຕັມໄປດ້ວຍອຸດຈາຣະແລະປັດສາວະທີ່ບໍ່ງາມສຳລັບຜູ້ງາມ
ສັດເຫຼົ່າໃດຍັງບໍ່ປາສະຈາກຣາຄະ
ຍັງມີຄວາມກຳໜັດໃນການທັງຫຼາຍ
ສັດເຫຼົ່ານັ້ນກໍຍັງລະຄວາມເກີດໃນທ້ອງໄປບໍ່ໄດ້

(ພຣະທະຣິມຸຂະປັດເຈກພຸດທະເຈົ້າ ຊົງຫວັງຈະສະແດງເຫດທີ່ພົ້ນຈາກທ້ອງ ຈຶ່ງຕັດໜຶ່ງຄາຖາ ເຄິ່ງແລະພຣະສຳມາສຳພຸດທະເຈົ້າຕັດເຄິ່ງພຣະຄາຖາສຸດທ້າຍວ່າ)

[໑໘] ສັດເຫຼົ່ານີ້ເກີດອອກມາມີກາຍແປດເປື້ອນດ້ວຍອຸດຈາຣະ
ດ້ວຍເລືອດແລະເສມຫະໃນຂະນະທີ່ເກີດ
ສັດເຫຼົ່ານີ້ມີຮ່າງກາຍສຳຜັດສ່ວນໃດ ໆ
ສ່ວນນັ້ນ ໆ ທັງໝົດ ລ້ວນບໍ່ໜ້າຊື່ນໃຈ
ເປັນທຸກຢ່າງດຽວ

[໑໗] ອາດຕະມາເຫັນແລ້ວຈຶ່ງຖວາຍພຣະພອນ
ບໍ່ແມ່ນໄດ້ຍິນມາຈາກຄົນອື່ນແລ້ວຈຶ່ງຖວາຍພຣະພອນ
ອາດຕະມາຍັງຣະນຶກອະດີດຊາດໄດ້ຫຼາຍອີກດ້ວຍ
ພຣະທະຣິມຸຂະປັດເຈກພຸດທະເຈົ້າໄດ້ໃຫ້ພຣະຣາຊາຜູ້ຊົງປີຊາຍານ
ຍອມຮັບດ້ວຍຄາຖາສຸພາສິດອັນວິຈິດ

**ທະຣິມຸຂະຊາດົກທີ ໓ ຈົບ**

## ໔. ເນຣຸຊາດົກ (໓໗໙)
## ວ່າດ້ວຍອານຸພາບຂອງພູເນຣຸ

(ຫົງນ້ອງຊາຍຂອງພະຍາຫົງໂພທິສັດສົນທະນາກັບອ້າຍວ່າ)

[໔໐] ກາປ່າກໍດີ ຝູງກາທຳມະດາກໍດີ
ພວກເຮົາຜູ້ປະເສີດກວ່ານົກທັງຫຼາຍກໍດີ
ພໍມາເຖິງພູນີ້ແລ້ວ ເປັນຄືກັນໝົດ
[໔໑] ຣາດຊະສີກໍດີ ເສືອໂຄ່ງກໍດີ ໝາຈອກກໍດີ ໝູ່ເນື້ອກໍດີ
ພໍມາເຖິງທີ່ນີ້ແລ້ວກໍເປັນຄືກັນໝົດ
ພູນີ້ຊື່ອັນໃດ

(ພະຍາຫົງໂພທິສັດກ່າວວ່າ)

[໔໒] ມະນຸດທັງຫຼາຍຮູ້ຈັກພູເຂົາທີ່ປະເສີດລູກນີ້ວ່າເນຣຸ
ເພາະສັດທຸກຊະນິດທີ່ຢູ່ພູໜ່ວຍນີ້
ຈະກາຍເປັນສີຄຳຄືກັນໝົດ

(ຫົງນ້ອງຊາຍໄດ້ຟັງດັ່ງນັ້ນ ຈຶ່ງໄດ້ກ່າວວ່າ)

[໔໓] ສະຖານທີ່ໃດຄົນດີບໍ່ໄດ້ຮັບການຍ້ອງຍໍ
ຊ້ຳຖືກດູໝິ່ນ ແຕ່ກັບຍ້ອງຍໍຄົນຊົ່ວ
ສະຖານທີ່ນັ້ນບໍ່ຄວນອາໄສຢູ່ເລີຍ

[໔໔] ສະຖານທີ່ໃດຄົນຂີ້ຄ້ານຄົນຂະຫຍັນ
ຄົນກ້າຫານ ແລະຄົນຂີ້ຢ້ານໄດ້ຮັບການບູຊາ
ສະຖານທີ່ນັ້ນຄົນດີບໍ່ຢູ່ ເໝືອນພູທີ່ບໍ່ເຮັດຄວາມແຕກຕ່າງກັນ

[໔໕] ພູເນຣຸນີ້ບໍ່ແຍກຄົນຊົ່ວ ຄົນດີ ຄົນປານກາງ
ຄື ບໍ່ທຳໃຫ້ແຕກຕ່າງກັນ
ຢ່າເປັນແຕ່ແນວນັ້ນເລີຍ ເຮົາສະລະພູເນຣຸນີ້ໄປເທີ້ນ

**ເນຣຸຊາດົກທີ ໘ ຈົບ**

## ໕. ອາສັງກະຊາດົກ (໓໘໐)
## ວ່າດ້ວຍອາສັງກາກຸມາຣິກາ

(ນາງອາສັງກາກຸມາຣິກາຂາບທູນພຣະຣາຊາວ່າ)

[໔໖] ເຄືອເຂົາຊື່ອາສາວະດີເກີດແລ້ວໃນອຸທະຍານຈິດລະດາວັນ
ເຄືອເຂົານັ້ນ ໑,໐໐໐ ປີ ຈຶ່ງຈະເປັນໝາກໜ່ວຍໜຶ່ງ

[໔໗] ແມ່ນດົນປານນັ້ນຈຶ່ງຈະມີໝາກ
ທວຍເທບກໍຍັງພາກັນໄປຢາມອຸທະຍານນັ້ນຢູ່ເລື້ອຍ ໆ
ຂ້າແດ່ມະຫາຣາດ ຂໍພຣະອົງຊົງຫວັງໄວ້ເທີ້ນ
ຍ້ອນວ່າຄວາມຫວັງທີ່ຍັງມີຜົນເປັນຄວາມສຸກ

[໔໘] ປັກສາທິຊາຊາດຍັງມີຄວາມຫວັງຢູ່ເລື້ອຍໄປ
ຄວາມຫວັງຂອງມັນທີ່ມີຢູ່ຫ່າງໄກເຖິງພຽງນັ້ນກໍຍັງສຳເລັດໄດ້
ຂ້າແດ່ມະຫາຣາດ ຂໍພຣະອົງຊົງຫວັງໄວ້ເທີ້ນ
ຍ້ອນວ່າຄວາມຫວັງທີ່ມີຜົນເປັນຄວາມສຸກ

(ພຣະຣາຊາຕັດບອກເຫດທີ່ຈະໄປກັບນາງອາສັງກາກຸມາຣິກາວ່າ)

[໔໙] ນາງໃຫ້ເຮົາເອີບອີ່ມດ້ວຍຄຳເວົ້າທໍ່ນັ້ນ
ບໍ່ໃຫ້ເຮົາເອີບອີ່ມດ້ວຍການກະທຳ
ເໝືອນດອກຫອນໄກ່ມີສີງາມ ແຕ່ບໍ່ມີກິ່ນ

[໕໐] ຜູ້ໃດເມື່ອບໍ່ໃຫ້ ບໍ່ເສຍສະລະໂພຄະຊັບ
ດີແຕ່ເວົ້າຄຳອ່ອນຫວານເຊິ່ງບໍ່ມີຜົນໃນມິດທັງຫຼາຍ
ຄວາມສຳພັນຂອງຜູ້ນັ້ນກັບມິດຍ່ອມຈືດຈາງ

[໕໑] ຄວນເວົ້າເຖິງແຕ່ສິ່ງທີ່ຄວນເຮັດ

ບໍ່ຄວນເວົ້າເຖິງສິ່ງທີ່ບໍ່ຄວນເຮັດ
ຄົນບໍ່ເຮັດ ດີແຕ່ເວົ້າ ບັນດິດຍ່ອມຮູ້ທັນ

[໓໘] ກຳລັງຂອງເຮົາໝົດສິ້ນແລ້ວນໍ ສະບຽງກໍບໍ່ມີ
ສົງໄສຈະຕາຍເປັນແນ່ ຢ່າເປັນແນວນັ້ນເລີຍ ເຮົາຈະໄປກັນດຽວນີ້ແລ

(ພຣະນາງອາສັງກາກຸມາຣິກາເທວີໄດ້ສະດັບພຣະຣາດຊະດຳຣັດນັ້ນ ຈຶ່ງຂາບທູນວ່າ)

[໓໙] ຄຳວ່າ ອາສັງກາ ນັ້ນແລເປັນຊື່ຂອງຂ້ານ້ອຍ
ຂ້າແດ່ມະຫາຣາດຜູ້ຈອມທັບ ຂໍພຣະອົງຊົງຖ້າກ່ອນ
ຂ້ານ້ອຍຂໍບອກລາບິດາກ່ອນ

**ອາສັງກະຊາດົກທີ ໕ ຈົບ**

## ໖. ມິຄາໂລປະຊາດົກ (໓໗໑)
## ວ່າດ້ວຍນົກແຮ້ງມິຄາໂລປະ

(ພະຍາແຮ້ງໂພທິສັດຮຽກລູກມາອົບຮົມວ່າ)

[໓໘] ມິຄາໂລປະ ພໍ່ບໍ່ພໍໃຈເລີຍທີ່ເຈົ້າບິນໄປແນວນັ້ນ
ລູກເອີຍ ເຈົ້າບິນສູງເກີນໄປ ກາຍຂອບເຂດຂອງພວກແຮ້ງໄປແລ້ວ

[໓໕] ເມື່ອໃດ ແຜ່ນດິນຜາກົດແກ່ເຈົ້າເໝືອນແປງນາ ໔ ຫຼ່ຽມ
ລູກເອີຍ ເມື່ອນັ້ນ ເຈົ້າຈົ່ງກັບຈາກບ່ອນນັ້ນ ຢ່າບິນກາຍບ່ອນນັ້ນໄປ

[໓໖] ແມ່ນນົກເຫຼົ່າອື່ນທີ່ມີປີກເປັນຍານພາຫະນະ ບິນໄປໃນອາກາດ
ສຳຄັນຕົນວ່າຍັ່ງຍືນ ຖືກແຮງລົມພັດພິນາດແລ້ວກໍມີຢູ່

(ພຣະສຳມາສຳພຸດທະເຈົ້າຕັດວ່າ)

[໓໗] ນົກແຮ້ງມິຄາໂລປະບໍ່ເຊື່ອຟັງຄຳສອນຂອງແຮ້ງອະປະຣັນນະພໍ່ຜູ້ເຖົ້າ
ບິນຜ່ານລົມກາລະໄປ ຕົກຢູ່ໃນອຳນາດລົມເວຣຳພາ (ລົມກົດ)

[໓໘] ລູກເມຍຂອງມັນ ແລະນົກແຮ້ງເຫຼົ່າອື່ນທີ່ອາໄສມັນເປັນຢູ່
ທັງໝົດກໍເຖິງຄວາມພິນາດ ເພາະນົກທີ່ບໍ່ເຮັດຕາມໂອວາດຕົວດຽວ

[໓໙] ຜູ້ໃດໃນໂລກນີ້ບໍ່ເຊື່ອຟັງຄຳຂອງຜູ້ໃຫຍ່ທັງຫຼາຍ
ປະພຶດເກີນຂອບເຂດຍ່ອມເດືອດຮ້ອນ
ເໝືອນນົກແຮ້ງທີ່ລະເມີດຄຳສອນ
ຊົນທັງຫຼາຍຍ່ອມເຖິງຄວາມພິນາດທຸກຄົນ
ເພາະບໍ່ເຮັດນຳຄຳສອນຂອງທ່ານຜູ້ຮູ້

**ນິຄາໂລປະຊາດົກທີ ໖ ຈົບ**

## ໗. ສິຣິກາລະກັນນິຊາດົກ (໓໘໔)

## ວ່າດ້ວຍສິຣິກັບກາລະກັນນີ

(ເສດຖີໂພທິສັດສົນທະນາກັບກາລະກັນນີເທບທິດາວ່າ)

[໔໐] ໃຜນໍມີຜິວພັນດຳ ທັງບໍ່ໜ້າຮັກ ບໍ່ໜ້າເບິ່ງ
ທ່ານເປັນໃຜ ເປັນລູກສາວຂອງຜູ້ໃດ ເຮົາຈະຮູ້ຈັກທ່ານໄດ້ແນວໃດ

(ກາລະກັນນີເທບທິດາກ່າວວ່າ)

[໔໑] ຂ້ານ້ອຍເປັນລູກສາວຂອງທ້າວວິຣູປັກຂະມະຫາຣາດ
ເປັນຄົນໂຫດຮ້າຍ ມີຜິວດຳ ຂາດປັນຍາ
ເທບທັງຫຼາຍຮູ້ຈັກຂ້ານ້ອຍວ່າກາລະກັນນີ
ຂ້ານ້ອຍຂໍທ່ານຈົ່ງໃຫ້ໂອກາດ
ຂ້ານ້ອຍຂໍອາໄສຢູ່ໃນສຳນັກຂອງທ່ານ

(ເສດຖີໂພທິສັດກ່າວວ່າ)

[໔໒] ທ່ານຕົກລົງປົງໃຈໃນຊາຍຜູ້ມີປົກກະຕິແນວໃດ
ມີຄວາມປະພຶດແນວໃດ
ແມ່ກາລີ ເຮົາຖາມແລ້ວ ທ່ານຈົ່ງຕອບ
ເຮົາຈະຮູ້ຈັກທ່ານໄດ້ແນວໃດ

(ກາລະກັນນີເທບທິດາໄດ້ບອກຄຸນຂອງຕົນວ່າ)

[໔໓] ຊາຍໃດມັກລົບຫຼູ່ຄຸນທ່ານ ຕີສະເໝີ
ແຂ່ງດີ ຣິສະຫຍາ ຂີ້ຖີ່ ແລະໂອ້ອວດ
ເຮັດຊັບທີ່ໄດ້ມາແລ້ວໃຫ້ພິນາດໄປ ຂ້ານ້ອຍຮັກແພງຊາຍນັ້ນ

(ກາລະກັນນີເທບທິດາກ່າວຕໍ່ໄປວ່າ)

[໔໔] ຊາຍໃດມັກໂກດ ຜູກໂກດ ເວົ້າສໍ່ສຽດ
ມັກທຳລາຍມິດຕະພາບ ມີວາຈາສຽດແທງ ເວົ້າວາຈາຫຍາບຄາຍ
ຂ້ານ້ອຍຮັກແພງຊາຍນັ້ນຍິ່ງກວ່າຊາຍຄົນທຳອິດ

[໔໕] ຊາຍທີ່ບໍ່ຮູ້ຈັກປະໂຫຍດຂອງຕົນວ່າ
ງານນີ້ຄວນເຮັດມື້ນີ້ ງານນີ້ຄວນເຮັດມື້ອື່ນ
ຖືກສັ່ງສອນກໍພານໂກດ ຊ້ຳຍັງດູໝິ່ນຄົນທີ່ດີກວ່າຕົນ

[໔໖] ຊາຍໃດມົວເມົາດ້ວຍການຫຼິ້ນເປັນປະຈຳ
ທັງຍັງກຳຈັດມິດທັງໝົດໄປສາ
ຂ້ານ້ອຍຮັກແພງຊາຍນັ້ນ ຈະມີຄວາມສຸກກັບເຂົາ

(ພຣະໂພທິສັດຕິຕຽນກາລະກັນນີເທບທິດານັ້ນວ່າ)

[໔໗] ແມ່ກາລີ ທ່ານຈົ່ງໄປຈາກບ່ອນນີ້ສາເທີ້ນ
ເລື້ອງເຊັ່ນນີ້ບໍ່ມີໃນພວກເຮົາ
ທ່ານຈົ່ງໄປສູ່ຊົນນະບົດ ນິຄົມ ແລະຣາດຊະທານີອື່ນ ໆ ເທີ້ນ

(ກາລະກັນນີເທບທິດາໄດ້ຟັງດັ່ງນັ້ນບໍ່ພໍໃຈ ຈຶ່ງກ່າວວ່າ)

[໔໘] ເລື້ອງນັ້ນແມ່ນຂ້ານ້ອຍກໍຮູ້ດີວ່າ ເລື້ອງເຊັ່ນນີ້ບໍ່ມີຢູ່ໃນພວກທ່ານ
ແຕ່ຄົນໂງ່ທັງຫຼາຍທີ່ລວບລວມຊັບໄວ້ເປັນຈຳນວນຫຼາຍ
ກໍຍັງມີຢູ່ໃນໂລກ
ສ່ວນຂ້ານ້ອຍແລະເທບອ້າຍຂອງຂ້ານ້ອຍທັງ ໔ ຄົນ
ຊ່ອຍກັນຜານຊັບນັ້ນຈົນໝົດສິ້ນ

(ພຣະໂພທິສັດເຫັນສິຣິເທບທິດາ ຈຶ່ງກ່າວວ່າ)

[໔໙] ໃຜນໍ ມີຜິວພັນທິບ ຢືນຮຽບຮ້ອຍຢູ່ເທິງແຜ່ນດິນ
ທ່ານເປັນໃຜ ເປັນລູກສາວຂອງຜູ້ໃດ ເຮົາຈະຮູ້ຈັກທ່ານໄດ້ແນວໃດ?

(ສິຣິເທບທິດາໄດ້ຟັງດັ່ງນັ້ນ ຈຶ່ງກ່າວຄາຖາທີ ໔ ວ່າ)

[໕໐] ຂ້ານ້ອຍເປັນລູກສາວຂອງທ້າວທະຣັດຖະມະຫາຣາດຜູ້ມີສິຣິ

ຂ້ານ້ອຍຊື່ສິຣິລັກສະໝີ ເທບທັງຫຼາຍຮູ້ຈັກຂ້ານ້ອຍວ່າ
ເປັນຜູ້ມີປັນຍາດັ່ງແຜ່ນດິນ
ຂ້ານ້ອຍຂໍທ່ານຈົ່ງໃຫ້ໂອກາດ
ຂ້ານ້ອຍຂໍອາໄສຢູ່ໃນສຳນັກຂອງທ່ານ

(ເສດຖີໂພທິສັດກ່າວວ່າ)

[໕໑] ທ່ານຕົກລົງປົງໃຈໃນຊາຍຜູ້ມີປົກກະຕິແນວໃດ
ມີຄວາມປະພຶດແນວໃດ
ນາງລັກສະໝີ ເຮົາຖາມແລ້ວ ທ່ານຈົ່ງຕອບ
ເຮົາຈະຮູ້ຈັກທ່ານໄດ້ແນວໃດ

(ສິຣິເທບທິດາກ່າວວ່າ)

[໕໒] ຊາຍໃດຊະນະອັນຕະລາຍທັງປວງໄດ້
ຄື ຄວາມໜາວ ຄວາມຮ້ອນ
ລົມ ແດດ ເຮືອດ ຍຸງ ສັດເລືອຄານ
ຄວາມຫິວ ແລະຄວາມກະຫາຍໄດ້
ເຮັດວຽກງານທຸກຢ່າງຕິດຕໍ່ຕະຫຼອດວັນຕະຫຼອດຄືນ
ບໍ່ເຮັດປະໂຫຍດທີ່ເປັນໄປຕາມການໃຫ້ເສື່ອມເສຍໄປດ້ວຍ
ຂ້ານ້ອຍພໍໃຈຊາຍນັ້ນແລະຈະຕົກລົງປົງໃຈກັບເຂົາ
[໕໓] ຊາຍໃດບໍ່ມັກໂກດ ເປັນກັນລະຍານະມິດ ເສຍສະລະ
ສົມບູນດ້ວຍສິນ ບໍ່ໂອ້ອວດ ຊື່ສັດ
ສົງເຄາະ ມີວາຈາມ່ວນອ່ອນຫວານ
ເຖິງຈະເປັນໃຫຍ່ກໍຖ່ອມຕົນ
ຂ້ານ້ອຍຈະເປັນຍິ່ງມີສີຣິອັນໄພບູນໃນຊາຍນັ້ນ
ເໝືອນຄື້ນທີ່ຜາກົດແກ່ຜູ້ແນມເບິ່ງທ້ອງທະເລ
[໕໔] ອີກຢ່າງໜຶ່ງ ຊາຍໃດສົງເຄາະບຸກຄົນ
ທັງທີ່ເປັນມິດຫຼືສັດຕູ ທັງຊັ້ນສູງ ສະເໝີກັນ ຫຼື ຕ່ຳກວ່າ
ທັງທີ່ປະພຶດສິ່ງທີ່ເປັນປະໂຫຍດ ຫຼື ບໍ່ເປັນປະໂຫຍດ
ທັງໃນທີ່ແຈ້ງຫຼືທີ່ລັບ
ຊາຍໃດບໍ່ເວົ້າຈາຫຍາບຄາຍບໍ່ວ່າໃນການໃດ ໆ
ຂ້ານ້ອຍຈະເປັນຂອງຊາຍນັ້ນເຖິງແມ່ນຈະຕາຍແລ້ວຫຼືຍັງມີຊີວິດຢູ່ກໍຕາມ

[໕໕] ບຸກຄົນໃດຂາດປັນຍາ ໄດ້ສິຣິທີ່ໜ້າຕ້ອງການແລ້ວ
ລືມຄຸນຄວາມດີແນວໃດແນວໜຶ່ງ
ບັນດາຄຸນຄວາມດີທີ່ໄດ້ກ່າວແລ້ວເຫຼົ່ານັ້ນ
ຂ້ານ້ອຍເວັ້ນບຸກຄົນນັ້ນເຊິ່ງມີສະພາບຮ້ອນຮົນ
ປະພຶດບໍ່ສະເໝີຕົ້ນສະເໝີປາຍ
ເໝືອນຄົນທີ່ມີນິໄສຮັກຄວາມສະອາດເວັ້ນທ່າງໄກຂຸມຄູດ

[໕໖] ບຸກຄົນຍ່ອມສ້າງຄວາມມີໂຊກດ້ວຍຕົນເອງ
ຍ່ອມສ້າງຄວາມບໍ່ມີໂຊກດ້ວຍຕົນເອງ
ຄົນອື່ນຈະທຳຄວາມມີໂຊກແລະຄວາມບໍ່ມີໂຊກໃຫ້ຄົນອື່ນບໍ່ໄດ້

**ສິຣິກາລະກັນນິຊາດົກທີ ໗ ຈົບ**

# ໘. ກຸກກຸຕະຊາດົກ (໓໘໓)
# ວ່າດ້ວຍໄກ່ໂພທິສັດ

(ນາງແມວໄປສູ່ເຫງົ້າຕົ້ນໄມ້ທີ່ໄກ່ຈັບຢູ່ແລ້ວອ້ອນວອນວ່າ)

[໕໗] ພໍ່ໄກ່ຫອນແດງຜູ້ມີຂົນປີກງົດງາມ ທ່ານຈົ່ງລົງມາຈາກງ່າໄມ້ເທີ້ນ
ເຮົາຈະຍອມເປັນພັນລະຍາຂອງທ່ານໂດຍບໍ່ຄິດມູນຄ່າ

(ໄກ່ໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໕໘] ແມ່ນາງແມວຮູບງາມ ທ່ານເປັນສັດສີ່ຕີນ
ສ່ວນເຮົາເປັນສັດສອງຕີນ
ແມວຕົວເມຍກັບໄກ່ຕົວຜູ້ບໍ່ຄວນຈະຣື່ນຣົມຍິນດີກັນຄືຜົວເມຍ
ທ່ານຈົ່ງຫາສາມີອື່ນເທີ້ນ

(ແມວໄດ້ຟັງດັ່ງນັ້ນຄິດຫາອຸບາຍໃໝ່ກ່າວວ່າ)

[໕໙] ເຮົາຈະເປັນພັນລະຍາສາວຂອງທ່ານທີ່ເວົ້າຈາອ່ອນຫວານ ໜ້າຮັກ
ຂໍທ່ານຈົ່ງຮັບເຮົາຜູ້ເລີໂສມ ຜູ້ເປັນສາວພົມມະຈາຣີໄວ້
ດ້ວຍການຮັບອັນດີງາມເທີ້ນ

(ໄກ່ໂພທິສັດໄດ້ຟັງດັ່ງນັ້ນແລ້ວຄິດຈະຂູ່ໄລ່ແມວໃຫ້ໜີໄປ ຈຶ່ງກ່າວວ່າ)

[໒໐] ນາງໂຈນຜູ້ກິນຊາກສົບ ດື່ມເລືອດ ເຈົ້າບຽດບຽນໄກ່
ຕ້ອງການເຮົາເປັນຜົວ ບໍ່ແມ່ນດ້ວຍການໄດ້ອັນດີງາມດອກ

(ພຣະສໍາມາສໍາພຸດທະເຈົ້າຕັດວ່າ)

[໒໑] ຍິງຜູ້ມີວາຈາປະກອບດ້ວຍອົງ ໔ ເຫັນຊາຍມີຊັບ
ກໍລໍ້ລວງນໍາໄປດ້ວຍການເວົ້າຈາອ່ອນຫວານ
ເໝືອນນາງແມວລໍ້ລວງໄກ່

[໒໔] ອັນໜຶ່ງ ຜູ້ໃດບໍ່ຮູ້ເທົ່າທັນເຫດທີ່ເກີດຂຶ້ນໂດຍທັນທີ
ຜູ້ນັ້ນຈະຕົກຢູ່ໃນອໍານາດຂອງສັດຕູ
ແລະຈະເດືອດຮ້ອນໃນພາຍຫຼັງ

[໒໓] ສ່ວນຜູ້ໃດຮູ້ເທົ່າທັນເຫດທີ່ເກີດຂຶ້ນໂດຍທັນທີ
ຜູ້ນັ້ນຍ່ອມພົ້ນຈາກຄວາມຄັບຂັນອັນເກີດຈາກສັດຕູ
ເໝືອນໄກ່ພົ້ນຈາກນາງແມວ

**ກຸກກຸຕະຊາດົກທີ ໙ ຈົບ**

## ໑. ທໍາມັດທະຊະຊາດົກ (໓໙໔)
## ວ່າດ້ວຍການມີທໍາເປັນທຸງໄຊ

(ກາຮຽກນົກທັງຫຼາຍມາກ່າວວ່າ)

[໒໔] ອ້າຍນ້ອງທັງຫຼາຍ ພວກທ່ານຈົ່ງປະພຶດທໍາເທີ້ນ
ຈົ່ງປະພຶດທໍາເທີ້ນ ພວກທ່ານຈະມີແຕ່ຄວາມຈະເລີນ
ເພາະວ່າຜູ້ປະພຶດທໍາຍ່ອມຢູ່ເປັນສຸກ
ທັງໃນໂລກນີ້ແລະໂລກໜ້າ

(ນົກທັງຫຼາຍເມື່ອບໍ່ຮູ້ຈຶ່ງພາກັນສັນເສີນກາທຸສິນນັ້ນວ່າ)

[໒໕] ການີ້ຈະເລີນຈິງນໍ ປະພຶດທໍາໄດ້ປະເສີດ
ຢືນດ້ວຍຂາຂ້າງດຽວສອນທໍາຢູ່

(ພະຍານົກໂພທິສັດຮຽກຝູງນົກມາສັ່ງໃຫ້ຖ້າຈັບກາວ່າ)

[໗໗]	ພວກເຈົ້າບໍ່ຮູ້ປົກກະຕິຂອງມັນ
ເພາະບໍ່ຮູ້ ຈຶ່ງພາກັນສັນເສີນມັນ
ມັນກິນທັງໄຂ່ແລະລູກອ່ອນແລ້ວເວົ້າວ່າ ທຳມະ ທຳມະ

[໗໘]	ມັນເວົ້າແບບໜຶ່ງແຕ່ເຮັດແບບໜຶ່ງ
ມັນປະພຶດທຳແຕ່ປາກ ແຕ່ກາຍບໍ່ປະພຶດທຳ
ເພາະສະນັ້ນ ມັນຈຶ່ງຊື່ວ່າບໍ່ຊົງທຳ

[໗໙]	ມັນປາກຫວານ ຮູ້ໃຈໄດ້ຍາກ
ແກ້ງເຮັດຕົວວ່າມີທຳເປັນທຸງໄຊ
ເໝືອນງູເຫົ່າຊ່ອນຕົວຢູ່ໃນຮູ
ໃຫ້ເຂົາຍ້ອງຍໍວ່າເປັນຜູ້ດີທຸກບ້ານທຸກເຂດ
ຄົນທຸສີນປະເພດນີ້ຄົນໂງ່ຮູ້ໄດ້ຍາກ

[໗໑]	ພວກທ່ານຈົ່ງໃຊ້ຈະງອຍປາກ ປີກ
ແລະຂາຈິກຕີກາຕົວນີ້
ເຮັດໃຫ້ກາຊົ່ວຊາມພິນາດໄປ
ກາຕົວນີ້ບໍ່ສົມຄວນຢູ່ຮ່ວມກັບພວກເຮົາ

**ທຳມັດທະຊະຊາດົກທີ ໗ ຈົບ**

## ໑໐. ນັນທິຍະມິຄະຣາຊະຊາດົກ (໓໘໕)
## ວ່າດ້ວຍພະຍາເນື້ອນັນທິຍະ

(ພໍ່ແມ່ຂອງເນື້ອນັນທິຍະໂພທິສັດຕ້ອງການຈະເຫັນລູກ ຈຶ່ງສົ່ງຂ່າວເຖິງລູກວ່າ)

[໗໐]	ພໍ່ພາມ ຖ້າທ່ານໄປປ່າອັນຊັນເມືອງສາເກດ
ຊ່ອຍບອກເນື້ອລູກຊາຍໃນໄສ້ຂອງຂ້າພະເຈົ້າທີ່ຊື່ນັນທິຍະແດ່ວ່າ
ພໍ່ແມ່ຂອງເຈົ້າແກ່ເຖົ້າປາຖະໜາຈະພົບເຈົ້າ

(ເນື້ອນັນທິຍະໂພທິສັດປະກາດຂໍ້ຄວາມນີ້ວ່າ)

[໗໑]	ທ່ານພາມ ຂ້າພະເຈົ້າໄດ້ກິນຫຍ້າ ນໍ້າ
ແລະເຂົ້າຂອງພຣະຣາຊາ
ກ້ອນເຂົ້າຂອງພຣະຣາຊານັ້ນ
ຂ້າພະເຈົ້າຈະບໍ່ພະຍາຍາມກິນໃຫ້ເສຍເປົ່າ

[໗໔] ຂ້າພະເຈົ້າຈະທັບຊ້າງໃຫ້ພຣະຣາຊາຜູ້ຊົງຖືທະນູ
ເມື່ອນັ້ນຂ້າພະເຈົ້າຈະເພິ່ງພົ້ນຄວາມຕາຍ
ໄດ້ຮັບຄວາມສຸກ ພົບເຫັນພໍ່ແມ່ໄດ້ແດ່

(ພຣະສຳມາສຳພຸດທະເຈົ້າໄດ້ຕັດວ່າ)

[໗໖] ເມື່ອກ່ອນເຮົາໄດ້ເປັນພະຍາເນື້ອ ໔ ຕີນ
ມີຮູບງາມຊື່ວ່ານັນທິຍະ ຢູ່ໃນທີ່ປະທັບຂອງພຣະເຈົ້າໂກສົນ

[໗໔] ພຣະເຈົ້າໂກສົນໄດ້ສະເດັດມາທີ່ອັນຊະນາມະຣິຄະທາຍະວັນ
ຊົງຍືດທະນູ ໃສ່ລູກສອນເພື່ອຈະຂ້າເຮົາ

[໗໕] ເຮົາໄດ້ທັບຊ້າງໃຫ້ພຣະຣາຊາຜູ້ຊົງຍືດທະນູພຣະອົງນັ້ນ
ເມື່ອນັ້ນເຮົາຈຶ່ງພົ້ນຄວາມຕາຍ ໄດ້ຮັບຄວາມສຸກ ມາພົບພໍ່ແມ່

**ນັນທິຍະມິຄະຣາຊະຊາດົກທີ ໑໐ ຈົບ**

**ອະວາຣິຍະວັກທີ ໑ ຈົບ**

# ລວມຊາດົກທີ່ມີໃນວັກນີ້ ຄື

໑. ອະວາຣິຍະຊາດົກ
໒. ທະຣີມຸຂະຊາດົກ
໓. ອາສັງກະຊາດົກ
໗. ສີຣິກາລະກັນນິຊາດົກ
໙. ທຳມັດທະຊະຊາດົກ
໔. ເສຕະເກຕຸຊາດົກ
໔. ເນຣຸຊາດົກ
໖. ມິຄາໂລປະຊາດົກ
໙. ກຸກກຸຕະຊາດົກ
໑໐. ນັນທິຍະມິຄະຣາຊະຊາດົກ

# ໘. ຂະຣະປຸດຕະວັກ

## ໝວດວ່າດ້ວຍມ້າເກີດຈາກລາ

## ໑. ຂະຣະປຸດຕະຊາດົກ (໓໗໙)

## ວ່າດ້ວຍມ້າສິນທົບລູກລາ

(ມ້າສິນທົບກ່າວກັບແບ້ທ້າວສັກກະຈຳແລງວ່າ)

[໗໙] ໄດ້ຍິນວ່າ ເປັນຄວາມຈິງທີ່ບັນດິດທັງຫຼາຍ
ກ່າວເຖິງແບ້ວ່າເປັນສັດໂງ່
ເບິ່ງເອົາເທີ້ນ ສັດໂງ່ບໍ່ຮູ້ຈັກກຳທີ່ຄວນເຮັດໃນບ່ອນລັບຫຼືບ່ອນແຈ້ງ

(ແບ້ທ້າວສັກກະຈຳແລງກ່າວວ່າ)

[໗໗] ເຈົ້າມ້າເພື່ອນຍາກ ເຈົ້າຈົ່ງຮູ້ເທີ້ນວ່າ
ເຈົ້າຊ່າງເປັນສັດໂງ່ຫຼາຍ
ຍ້ອນເຈົ້າຖືກສົນຕະພາຍຈົນປາກຄົດໜ້າຫງາຍ

[໗໘] ເພື່ອນ ຄວາມໂງ່ຂອງເຈົ້າອີກແນວໜຶ່ງ
ຄືຖືກເຂົາປ່ອຍແລ້ວບໍ່ໜີໄປ ເພື່ອນເອີຍ
ແຕ່ພຣະເຈົ້າເສນະກະທີ່ເພື່ອນລາກໄປໂງ່ກວ່າເຈົ້າເສຍອີກ

(ມ້າສິນທົບຟັງຄຳຂອງແບ້ຈຳແລງແລ້ວຈຶ່ງກ່າວວ່າ)

[໗໙] ພະຍາແບ້ເພື່ອນຍາກ ທ່ານຮູ້ເຫດທີ່ເຮົາໂງ່
ແຕ່ພຣະເຈົ້າເສນະກະໂງ່ຍ້ອນເຫດອັນໃດ
ເຮົາຖາມແລ້ວ ເຈົ້າຈົ່ງບອກເຫດນັ້ນ

(ແບ້ທ້າວສັກກະຈຳແລງບອກວ່າ)

[໘໐] ຜູ້ໃດໄດ້ປະໂຫຍດສູງສຸດແລ້ວຈະຍົກໃຫ້ພັນລະຍາ
ດ້ວຍການຍົກໃຫ້ນັ້ນ ເຂົາຈັກຕ້ອງສະລະຕົນ
ສ່ວນພັນລະຍານັ້ນຈັກບໍ່ເປັນພັນລະຍາຂອງເຂົາອີກ

(ແບ້ທ້າວສັກກະຈຳແລງກ່າວອີກວ່າ)

[໗໑] ພຣະອົງຜູ້ເປັນຈອມແຫ່ງຊົນ ບຸກຄົນຜູ້ເຊັ່ນກັບພຣະອົງ
ມາປະຖິ້ມຕົວເອງດ້ວຍຄິດວ່າ ເຮົາມີສິ່ງອັນເປັນທີ່ຮັກ
ຍ່ອມບໍ່ປະສົບສິ່ງອັນເປັນທີ່ຮັກທັງຫຼາຍ
ຍ້ອນຕົນແລປະເສີດກວ່າ
ແລະຍັງປະເສີດກວ່າສິ່ງອັນເປັນທີ່ຮັກຊັ້ນຢູ່ງມ
ບຸຣຸດສັ່ງສົມປະໂຫຍດແລ້ວກໍຈະເພິ່ງໄດ້ພັນລະຍາອັນເປັນທີ່ຮັກໃນພາຍຫຼັງ

## ໔. ສູຈິຊາດົກ (໓໗໗)
## ວ່າດ້ວຍເຂັມ

(ຊ່າງຄໍາໂພທິສັດຢືນໃກ້ປະຕູເຮືອນຂອງຫົວໜ້າຊ່າງຄໍາ ອະທິບາຍເລື້ອງເຂັມວ່າ)

[໗໔] ໃຜຕ້ອງການຈະຊື້ເຂັມທີ່ບໍ່ຂຸຂະ ບໍ່ຫຍາບ ຂັດດ້ວຍຫີນແຂງ
ມີຮູຮ້ອຍດ້າຍຮຽບຮ້ອຍ ເຫຼັ້ມນ້ອຍ ແລະປາຍຄົມນໍາ

(ຊ່າງຄໍາໂພທິສັດອະທິບາຍເລື້ອງເຂັມນັ້ນອີກວ່າ)

[໗໓] ໃຜຕ້ອງການຈະຊື້ເຂັມທີ່ກ້ຽງມື່ນ ມີຮູຮ້ອຍດ້າຍຮຽບຮ້ອຍ
ກົມກືງຕະຫຼອດເຫຼັ້ມ
ເຈາະໜ້າທັ່ງຊອດໄດ້ ແລະແຂງກ້ານໍາ

(ນາງກຸມາຣິກາເວົ້າກັບຊ່າງຄໍາໂພທິສັດວ່າ)

[໗໔] ດຽວນີ້ ເຂັມແລະເບັດຖືກນໍາອອກໄປຈາກໝູ່ບ້ານນີ້
ນີ້ໃຜກັນຕ້ອງການຈະຂາຍເຂັມໃນໝູ່ບ້ານຊ່າງຄໍາ

[໗໕] ອາວຸດກໍອອກໄປຈາກໝູ່ບ້ານນີ້
ວຽກງານຊະນິດຕ່າງ ໆ ຈໍານວນຫຼາຍ
ຍ່ອມເປັນໄປດ້ວຍອຸປະກອນຈາກໝູ່ບ້ານນີ້
ນີ້ໃຜກັນຕ້ອງການຈະຂາຍເຂັມໃນໝູ່ບ້ານຊ່າງຄໍາ

(ຊ່າງຄໍາໂພທິສັດຟັງຄໍາຂອງນາງກຸມາຣິການັ້ນ ຈຶ່ງກ່າວວ່າ)

[໗໖] ຄົນທີ່ສະຫຼາດຮູ້ຢູ່ເພິ່ງມາຂາຍເຂັມໃນໝູ່ບ້ານຊ່າງເຫຼັກ
ອາຈານທ່ານັ້ນຈຶ່ງຈະຮູ້ໄດ້ວ່າ ງານນັ້ນເຮັດດີຫຼືບໍ່ດີ

[໗໗] ນາງຜູ້ຈະເລີນ ຖ້າບິດາຂອງທ່ານຮູ້ເລື້ອງເຂັ້ມເຫລັ້ມນີ້ທີ່ເຮົາເຮັດແລ້ວ
ຈະຕ້ອງເຊື້ອເຊີນເຮົາດ້ວຍຕົວທ່ານແລະຊັບສິນອື່ນ ໆ ທີ່ມີຢູ່ໃນເຮືອນນີ້

**ສູຈິຊາດົກທີ ໘ ຈົບ**

# ໓. ຕຸນທິລະຊາດົກ (໓໘໘)

# ວ່າດ້ວຍຕຸນທິລະໝູໂພທິສັດ

(ຈູລະຕຸນທິລະໝູບອກເຫດທີ່ຕົນເຫັນມາວ່າ)

[໘໘] ວັນນີ້ ນາຍແມ່ຂອງເຮົາປຸ່ງນອາຫານໃຫ້ໃໝ່
ຮາງເຂົ້າມີອາຫານເຕັມບໍລິບູນ
ນາຍແມ່ກໍຢືນຢູ່ໃກ້ ໆ
ຄົນຈໍານວນຫຼາຍກໍຢືນຖືບ້ວງຢູ່
ເຮົາບໍ່ຢາກກິນເລີຍ

(ມະຫາຕຸນທິລະໝູໂພທິສັດໄດ້ກ່າວວ່າ)

[໘໙] ເຈົ້າສະດຸ້ງຢ້ານ ຫົວໝຸນ ແນມຫາທີ່ເພິ່ງໄປຫຍັງ
ເຈົ້າບໍ່ມີທີ່ເພິ່ງດອກ ຈະໜີໄປໄສເດ
ຕຸນທິລະ ຢ່າດີ້ນຮົນໄປເລີຍ ກິນສາເທີ້ນ
ພວກເຮົາຖືກເຂົາຂຸນເພື່ອຕ້ອງການຊີ້ນ

[໙໐] ເຈົ້າຈົ່ງລົງສູ່ຫ້ວງນໍ້າທີ່ບໍ່ມີຕົມ
ຊໍາຣະເຫື່ອແລະມົນທິນທັງປວງໃຫ້ສິ້ນໄປ
ແລ້ວຖືເອົາເຄື່ອງລູບໄລ້ຊະນິດໃໝ່
ທີ່ມີກິ່ນຫອມບໍ່ຈາງຫາຍໄປໃນການໃດ ໆ

(ຈູລະຕຸນທິລະໝູຖາມວ່າ)

[໙໑] ອັນໃດນໍ? ຄືຫ້ວງນໍ້າທີ່ບໍ່ມີຕົມ
ອັນໃດນໍ? ທີ່ຮຽກວ່າເຫື່ອແລະມົນທິນ
ແລະອັນໃດນໍ? ຄືເຄື່ອງລູບໄລ້ຊະນິດໃໝ່
ທີ່ມີກິ່ນຫອມບໍ່ຈາງຫາຍໄປໃນການໃດ ໆ

(ມະຫາຕຸນທິລະໝູໂພທິສັດກ່າວວ່າ)

[໙໔] ທຳມະຄືຫ້ວງນ້ຳທີ່ບໍ່ມີຕົມ
ບາບຮຽກວ່າເຫື່ອແລະມົນທິນ
ອັນໜຶ່ງ ສິນຄືເຄື່ອງລູບໄລ້ຊະນິດໃໝ່
ທີ່ມີກິ່ນຫອມບໍ່ຈາງຫາຍໄປໃນການໃດ ໆ

[໙໓] ຄົນທີ່ຂ້າສັດຍ່ອມພໍໃຈ ສ່ວນສັດທີ່ຖືກຂ້າຍ່ອມບໍ່ພໍໃຈ
ໃນຄືນເດືອນເພັງແຫ່ງວັນອຸໂປສົດ
ສັດທັງຫຼາຍເຊັ່ນເຮົາຍິນດີສະລະຊີບ

**ຕຸນທິລະຊາດົກທີ ໓ ຈົບ**

## ໔. ສຸວັນນະກັກກະຕະກະຊາດົກ (໓໙໙)
## ວ່າດ້ວຍປູຄຳທີ່ສະຫຼາດ

(ກາດ່າງວ່າ)

[໙໔] ເຮົາຖືກປູຄຳເຊິ່ງມີຕາດູນອອກມາ
ມີກະດູກເປັນໜັງ ອາໄສຢູ່ໃນນ້ຳ ບໍ່ມີຂົນ ໜີບແລ້ວ
ຮ້ອງຂໍຄວາມກະລຸນາຢູ່
ເພື່ອນເອີຍ ຍ້ອນເຫດໃດນໍ ທ່ານຈຶ່ງລະຖິ້ມເຮົາໄປ

(ພຣະສາດສະດາຊົງສະແດງຂໍ້ຄວາມນີ້ວ່າ)

[໙໕] ງູຜູ້ເປັນເພື່ອນນັ້ນ ເມື່ອຈະປ້ອງກັນກາຜູ້ເປັນເພື່ອນ
ຈຶ່ງພົ່ນພິດພ້ອມກັບແຜ່ພັງພານໃຫຍ່ໄປຈົນເຖິງຕົວປູ
ປູຈຶ່ງໄດ້ໜີບງູໄວ້ອີກ

(ງູຖາມປູວ່າ)

[໙໖] ກໍທຳມະດາປູບໍ່ຕ້ອງການຈະຈັບກາກິນ
ແລະບໍ່ຕ້ອງການຈະຈັບງູເທົ່າກິນ
ທ່ານຜູ້ມີຕາດູນ ເຮົາຂໍຖາມທ່ານ
ເມື່ອເປັນເຊັ່ນນັ້ນ ຍ້ອນເຫດໃດທ່ານຈຶ່ງໜີບເຮົາທັງ ໒ ໄວ້

(ປູຈຶ່ງບອກເຫດຜົນທີ່ໜີບກາໄວ້ວ່າ)

[໙໗] ຊາຍນີ້ເປັນຜູ້ຫວັງຄວາມຈະເລີນແກ່ຂ້າພະເຈົ້າ
ຈັບຂ້າພະເຈົ້າແລ້ວນຳໄປແອ່ງນ້ຳ
ເມື່ອເຂົາຕາຍ ຂ້າພະເຈົ້າຈະມີທຸກບໍ່ແມ່ນໜ້ອຍ
ຂ້າພະເຈົ້າແລະຊາຍນີ້ກໍຈະບໍ່ມີທັງ ໒ ຄົນ

[໙໘] ອັນໜຶ່ງ ຊົນທັງມວນເຫັນຂ້າພະເຈົ້າມີຮ່າງກາຍຈະເລີນເຕີບໃຫຍ່
ມີຊີ້ນແຊບ ມີຊີ້ນຫຼາຍ ແລະມີຊີ້ນນຸ້ມ ກໍຕ້ອງການຈະບຽດບຽນ
ແມ່ນກາທັງຫຼາຍເຫັນຂ້າພະເຈົ້າແລ້ວກໍເພິ່ງບຽດບຽນ

(ງູຕ້ອງການລວງປູ ຈຶ່ງກ່າວວ່າ)

[໙໙] ຖ້າເຮົາທັງ ໒ ຖືກໜີບຍ້ອນເຫດແຫ່ງຊາຍນີ້
ຂໍຊາຍນີ້ຈົ່ງລຸກຂຶ້ນ ຂ້າພະເຈົ້າຈະດູດພິດໃຫ້
ຂໍທ່ານຈົ່ງປ່ອຍຂ້າພະເຈົ້າແລະກາໂດຍໄວ
ກ່ອນທີ່ພິດອັນຮ້າຍແຮງຈະເຂົ້າສູ່ຊາຍນີ້

(ປູໄດ້ຟັງດັ່ງນັ້ນຄິດອຸບາຍໄດ້ແລ້ວ ຈຶ່ງກ່າວວ່າ)

[໑໐໐] ຂ້າພະເຈົ້າຈະປ່ອຍງູແຕ່ຈະຍັງບໍ່ປ່ອຍກາ
ກາຈັກເປັນຕົວປະກັນກ່ອນຈົນກວ່າຂ້າພະເຈົ້າຈະເຫັນ
ຊາຍນີ້ມີຄວາມສຸກ ປາສະຈາກໂຣກແລ້ວ
ຈຶ່ງຈະປ່ອຍກາເໝືອນປ່ອຍງູ

(ພຣະສາດສະດາຕັດພຣະຄາຖາສຸດທ້າຍປະຊຸມຊາດົກວ່າ)

[໑໐໑] ກາໃນການນັ້ນຄືພຣະເທວະທັດ ສ່ວນງູເທົ່າຄືມານ
ປູຄືພຣະອານົນ ສ່ວນພາມໂຊກດີຄືເຮົາຜູ້ເປັນສາດສະດາ

**ສຸວັນນະກັກກະຕະກະຊາດົກທີ່ ໔ ຈົບ**

## ໕. ໄມທະກະສະກຸນະຊາດົກ (໓໙໐)
## ວ່າດ້ວຍນົກໄມທະກະ

(ລືສີໂພທິສັດສະແດງທຳແກ່ນ້ອງຊາຍວ່າ)

[໑໐໔] ນົກໄມຫະກະບິນໄປຕາມໂນນພູແລະຮ່ອມພູ
ຈັບທີ່ຕົ້ນລຸງບເຊິ່ງມີໝາກສຸກແລ້ວຮ້ອງວ່າ ຂອງກູ ຂອງກູ

[໑໐໖] ເມື່ອມັນຮ້ອງຈົ່ມຢູ່ແນວນີ້ ຝູງນົກທີ່ບິນຮ່ວມກັນມາ
ກໍພາກັນຈິກກິນໝາກໝົດແລ້ວກໍບິນຈາກໄປ
ມັນກໍຍັງຄົງຮ້ອງຈົ່ມຢູ່ວ່າ ຂອງກູ ຂອງກູ ຢູ່ຄືເກົ່າ ສັນໃດ

[໑໐໔] ຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ
ເກັບທອມຮອມຮິບຊັບໄວ້ເປັນຈຳນວນຫຼາຍ
ຕົນເອງກໍບໍ່ໄດ້ໃຊ້ສອຍ ບາງສ່ວນກໍບໍ່ໄດ້ແບ່ງໃຫ້ໝູ່ຍາດເລີຍ

[໑໐໕] ເຂົາບໍ່ໄດ້ໃຊ້ສອຍຫຼືບໍລິໂພກສົມບັດອື່ນ ໆ
ທີ່ຕົນມີຢູ່ແມ່ນແຕ່ເວລາດຽວ
ບໍ່ວ່າຈະເປັນເຄື່ອງນຸ່ງຫົ່ມ ອາຫານ ມາໄລ ຫຼືເຄື່ອງລູບໄລ້ກໍຕາມ
ອັນໜຶ່ງ ພວກຍາດ ໆ ເຂົາກໍບໍ່ສົງເຄາະ

[໑໐໖] ເມື່ອເຂົາຈົ່ມຢູ່ວ່າ ຂອງກູ ຂອງກູ ຢູ່ແນວນີ້ ຫວງແຫນຢູ່
ພຣະຣາຊາແດ່ ພວກໂຈນແດ່
ພວກທາຍາດບໍ່ເປັນທີ່ຮັກແດ່ ກໍສົກສວຍເອົາຊັບໄປ
ຄົນຜູ້ນັ້ນກໍຍັງຄົງຈົ່ມເພີ້ຢູ່ແນວນັ້ນ

[໑໐໗] ສ່ວນນັກປາດໄດ້ໂພຄະທັງຫຼາຍແລ້ວຍ່ອມສົງເຄາະພວກຍາດ
ຍ້ອນການສົງເຄາະນັ້ນເຂົາຍ່ອມໄດ້ຮັບກຽດຕິຍົດຊື່ສຽງ
ເຂົາຈາກໂລກນີ້ໄປແລ້ວກໍບັນເທີງໃນສະຫວັນ

**ໄມຫະກະສະກຸນະຊາດົກທີ ໕ ຈົບ**

## ໖. ປັບພະຊິຕະວິເຫຖະກະຊາດົກ (໖໙໑)
## ວ່າດ້ວຍຜູ້ບຽດບຽນນັກບວດ

(ພຣະຣາຊາຊົງເຈຣະຈາກັບວິທະຍາທອນວ່າ)

[໑໐໘] ທ່ານຜູ້ມີຮູບງາມປະນົມມືນະມັດສະການສະມະນະຮູບຊາມທີ່ຢູ່ຂ້າງໜ້າ
ສະມະນະນັ້ນປະເສີດກວ່າທ່ານຫຼືສະເໝີທ່ານ
ຂໍທ່ານຈົ່ງບອກຊື່ຂອງຕົນເອງແລະຊື່ຂອງສະມະນະອົງນັ້ນ

(ທ້າວສັກກະໂພທິສັດຂາບທູນພຣະຣາຊາວ່າ)

[໑໐໙] ຂ້າແດ່ມະຫາຣາດ ທວຍເທບທັງຫຼາຍຈະບໍ່ປະກາດຊື່
ແລະໂຄດຂອງວິສຸດທິເທບຜູ້ດຳເນີນໄປ
ແຕ່ຂ້າພຣະອົງຈະບອກຊື່ຂອງຕົນແດ່ພຣະອົງ
ຂ້າພຣະອົງຄືທ້າວສັກກະຜູ້ເປັນຈອມເທບຊັ້ນໄຕຣທົດ

(ພຣະຣາຊາຕັດຖາມເຖິງປະໂຫຍດໃນການນອບນ້ອມພິກຂຸວ່າ)

[໑໑໐] ຜູ້ໃດເຫັນພິກຂຸຜູ້ສົມບູນດ້ວຍຈະຣະນະແລ້ວ
ໃຫ້ທ່ານຢູ່ຂ້າງໜ້າປະນົມມືນະມັດສະການຢູ່
ຂ້າແດ່ເທວະຣາດ ຂ້າພຣະອົງຂໍຖາມເນື້ອຄວາມນັ້ນກັບພຣະອົງ
ຜູ້ນັ້ນຈາກໂລກນີ້ໄປແລ້ວຈະໄດ້ຄວາມສຸກບໍ?

(ທ້າວສັກກະໂພທິສັດຕັດບອກວ່າ)

[໑໑໑] ຜູ້ໃດເຫັນພິກຂຸຜູ້ສົມບູນດ້ວຍຈະຣະນະແລ້ວ
ໃຫ້ທ່ານຢູ່ຂ້າງໜ້າປະນົມມືນະມັດສະການຢູ່
ຜູ້ນັ້ນຈະໄດ້ຮັບການສັນເສີນໃນປັດຈຸບັນ
ແລະຫຼັງຈາກຕາຍແລ້ວຈະໄປເກີດໃນສະຫວັນ

(ພຣະຣາຊາທຳລາຍຄວາມຍຶດຖືຜິດຂອງຕົນໄດ້ແລ້ວຊົງດີພຣະທະໄທ ຈຶ່ງຕັດວ່າ)

[໑໑໒] ວັນນີ້ ມິ່ງຂວັນໄດ້ເກີດຂຶ້ນແກ່ຂ້າພຣະອົງແລ້ວນໍ
ທີ່ຂ້າພຣະອົງໄດ້ເຫັນທ້າວວາສະວະຜູ້ເປັນຈອມເທບ
ຂ້າແດ່ທ້າວສັກກະ ຂ້າພຣະອົງເຫັນພິກຂຸແລະພຣະອົງແລ້ວ
ຈະທຳບຸນໃຫ້ຫຼາຍ ໆ

(ທ້າວສັກກະໂພທິສັດຕັດຊົມເຊີຍບັນດິດວ່າ)

[໑໑໓] ຊົນເຫຼົ່າໃດມີປັນຍາ ເປັນພະຫູສູດ
ຄິດເຫດການໄດ້ເປັນຈຳນວນຫຼາຍ
ຊົນເຫຼົ່ານັ້ນຄວນຄົບໂດຍແທ້
ຂໍເດຊະພຣະຣາຊາ ພຣະອົງຊົງເຫັນພິກຂຸແລະຂ້າພຣະອົງແລ້ວ
ຂໍຈົ່ງທຳບຸນໃຫ້ຫຼາຍເທີ້ນ

(ພຣະຣາຊາຕັດວ່າ)

[໑໑໔] ຂ້າແດ່ ພຣະອົງຜູ້ຈອມເທບ
ຍ້ອນໄດ້ຟັງຄຳອັນເປັນສຸພາສິດຂອງພຣະອົງ
ຂ້າພຣະອົງຈັກບໍ່ເປັນຄົນມັກໂກດ ມີຈິດຜ່ອງໃສຢູ່ເປັນນິດ
ເປັນຜູ້ຄວນແກ່ການຂໍຂອງແຂກທຸກຄົນ
ຈັກກຳຈັດມານະແລ້ວຂາບໄຫວ້ທ່ານຜູ້ຄວນຂາບໄຫວ້

**ປັບພະຊິຕະ ວິເທຫະກະຊາດົກທີ ໖ ຈົບ**

## ໗. ອຸປະສິງຂະປຸບຜະຊາດົກ (໓໙໒)
## ວ່າດ້ວຍລືສີລັກດົມດອກໄມ້

(ເທບທິດາອົງໜຶ່ງສະຖິດຢູ່ທີ່ຄ່າຄົບຕົ້ນໄມ້ ຕ້ອງການໃຫ້ລືສີໂພທິສັດສະຫຼົດໃຈ ຈຶ່ງກ່າວວ່າ)

[໑໑໕] ທ່ານຜູ້ນິຣະທຸກ ການທີ່ທ່ານ
ລັກດົມດອກບົວທີ່ເຂົາຍັງບໍ່ໄດ້ໃຫ້ນັ້ນ
ເປັນອົງແຫ່ງການຂະໂມຍຢ່າງໜຶ່ງ
ທ່ານຊື່ວ່າເປັນຜູ້ຂະໂມຍກິ່ນ

(ລືສີໂພທິສັດກ່າວວ່າ)

[໑໑໖] ດອກບົວອາດຕະມາກໍບໍ່ໄດ້ລັກແລະບໍ່ໄດ້ຫັກ ດົມຢູ່ຫ່າງ ໆ
ເມື່ອເປັນແນວນັ້ນ ເປັນຫຍັງຈຶ່ງຖືກກ່າວຫາວ່າເປັນຜູ້ຂະໂມຍກິ່ນ

(ລືສີໂພທິສັດເຫັນບຸຣຸດຂຸດເຫງົ້າບົວເກັບດອກບົວ ຈຶ່ງກ່າວກັບເທບທິດານັ້ນວ່າ)

[໑໑໗] ຊາຍໃດຂຸດເອົາເຫງົ້າບົວ ຫັກເອົາດອກບົວຂາວໄປ
ຊາຍນັ້ນຫຍາບຊ້າຢ່າງນີ້ ເປັນຫຍັງບໍ່ຖືກກ່າວຫາ

(ເທບທິດາບອກສາເຫດທີ່ບໍ່ວ່າກ່າວບຸຣຸດນັ້ນວ່າ)

[໑໑໘] ຄົນທີ່ເຮັດວຽກຫຍາບຊ້າຫຼາຍເປັນຄົນແປດເປື້ອນ
ເໝືອນຜ້ານຸ່ງຂອງແມ່ຍິງລ້ຽງເດັກ
ສຳລັບຊາຍຄົນນັ້ນເຮົາບໍ່ວ່າອັນໃດ
ແຕ່ທ່ານເຮົາສົມຄວນຈະວ່າກ່າວ

[໑໑໙] ບຸກຄົນຜູ້ບໍລິສຸດສະແຫວງຫາແຕ່ກຳອັນສະອາດຢູ່ສະເໝີ
ຄວາມຊົ່ວເທົ່າປາຍຂົນຊາຍຍ່ອມຜາກົດເໝືອນເທົ່າໜອກເມກ

(ລືສີໂພທິສັດເຊິ່ງເທບທິດານັ້ນໃຫ້ສະຫຼົດໃຈກ່າວວ່າ)

[໑໒໐] ນີ້ເທບຜູ້ຄວນບູຊາ ທ່ານຮູ້ຈັກອາດຕະມາດີ
ຊ້ຳຍັງໄດ້ອະນຸເຄາະອາດຕະມາດ້ວຍ
ຂໍທ່ານໂຜດເຕືອນຊ້ຳອີກ ເມື່ອເຫັນຄວາມບົກຜ່ອງເຊັ່ນນີ້ຂອງເຮົາ

(ເທບທິດາກ່າວວ່າ)

[໑໒໑] ຂ້າພະເຈົ້າບໍ່ໄດ້ອາໄສທ່ານລ້ຽງຊີບ
ແລະບໍ່ໄດ້ເປັນລູກຈ້າງຂອງທ່ານ
ທ່ານຜູ້ເຫັນໄພ ທ່ານເອງນັ້ນແລ
ຄວນຈະຮູ້ຈັກກຳອັນເປັນເຫດໃຫ້ໄປສູ່ສຸກຄະຕິ

**ອຸປະສິງຂະປຸບຜະຊາດົກທີ ໗ ຈົບ**

## ໘. ວິຂາສາທະຊາດົກ (໓໙໓)
## ວ່າດ້ວຍຜູ້ບໍຣິໂພກອາຫານທີ່ເປັນເງື່ອນ

(ທ້າວສັກກະເທວະຣາດໂພທິສັດຈຳແລງເປັນນົກແຂກເຕົ້າມາຍັງທີ່ຢູ່ຂອງເຫຼົ່າດາບົດ ເມື່ອຈະເຮັດໃຫ້ດາບົດເຫຼົ່ານັ້ນສະຫຼົດໃຈ ໄດ້ກ່າວວ່າ)

[໑໒໔] ພວກຄົນກິນເງື່ອນພາກັນຢູ່ສະບາຍແທ້ນໍ
ຊ້ຳໄດ້ຮັບການສັນເສີນໃນປັດຈຸບັນແລະຈະມີສຸກຄະຕິໃນໂລກໜ້າ

(ດາບົດຕົນໜຶ່ງຮຽກດາບົດທີ່ເຫຼືອມາກ່າວວ່າ)

[໑໒໕] ທ່ານບັນດິດຜູ້ຮ່ວມອຸທອນທັງຫຼາຍ
ພວກທ່ານບໍ່ສົນໃຈທີ່ຈະຟັງນົກແຂກເຕົ້າເວົ້າ
ພວກທ່ານຈົ່ງຟັງຄຳຂອງນົກແຂກເຕົ້າ
ນົກແຂກເຕົ້າຕົວນີ້ກຳລັງສັນເສີນພວກເຮົາເປັນແນ່

(ນົກແຂກເຕົ້າກ່າວກັບດາບົດເຫຼົ່ານັ້ນວ່າ)

[໑໔໔] ຂ້າພະເຈົ້າບໍ່ໄດ້ສັນເສີນພວກທ່ານ
ທ່ານຜູ້ກິນຊາກສົບທັງຫຼາຍ ພວກທ່ານຈົ່ງຟັງຂ້າພະເຈົ້າ
ພວກທ່ານເປັນຜູ້ບໍລິໂພກອາຫານທີ່ເຫຼືອຖິ້ມ
ແຕ່ບໍ່ແມ່ນຜູ້ບໍລິໂພກອາຫານທີ່ເປັນເງື່ອນ

(ດາບົດທັງໝົດຟັງຄຳຂອງນົກແຂກເຕົ້າແລ້ວ ໄດ້ກ່າວວ່າ)

[໑໔໕] ພວກເຮົາບວດມາແລ້ວ ໗ ພັນສາ ເກົ້າມວຍຜົມ
ລ້ຽງຊີບດ້ວຍອາຫານທີ່ເປັນເງື່ອນຢູ່ທ່າມກາງປ່າ
ຖ້າຫາກພວກເຮົາເປັນຜູ້ສົມຄວນທີ່ທ່ານຈະຕິຕຽນ
ແລ້ວພວກໃດນໍເປັນຜູ້ສົມຄວນທີ່ທ່ານຈະສັນເສີນ

(ທ້າວສັກກະເທວະຣາດໂພທິສັດຕ້ອງການຈະໃຫ້ດາບົດເຫຼົ່ານັ້ນເກີດຄວາມລະອາຍ ຈຶ່ງກ່າວວ່າ)

[໑໔໖] ພວກທ່ານລ້ຽງຊີບດ້ວຍອາຫານອັນເຫຼືອຖິ້ມຂອງຣາດຊະສີ
ເສືອໂຄ່ງ ແລະເນື້ອຮ້າຍ ຍັງສຳຄັນຕົນວ່າ ເປັນຄົນກິນເງື່ອນ

(ພຣະອົງເມື່ອຈະບອກຂໍ້ຄວາມນັ້ນແກ່ດາບົດເຫຼົ່ານັ້ນ ຈຶ່ງກ່າວຄາຖາທີ ໖ ວ່າ)

[໑໔໗] ຊົນເຫຼົ່າໃດໃຫ້ອາຫານແກ່ສະມະນະພາມ
ແລະວະນິພົກອື່ນ ໆ
ແລ້ວບໍລິໂພກອາຫານທີ່ເຫຼືອ
ຊົນເຫຼົ່ານັ້ນຊື່ວ່າເປັນຄົນກິນເງື່ອນ

**ວິຄາສາທະຊາດົກທີ ໘ ຈົບ**

## ໙. ວັດຕະກະຊາດົກ (໓໙໔)
## ວ່າດ້ວຍນົກຄຸ່ມໂພທິສັດ

(ນົກຄຸ່ມໂພທິສັດກ່າວຕ້ອນຮັບກາໂລເລວ່າ)

[໑໔໘] ທ່ານລຸງກາ ທ່ານກິນອາຫານຢ່າງດີ ທັງເນີຍໃສແລະນ້ຳມັນ
ແຕ່ເປັນຫຍັງທ່ານຈຶ່ງຈ່ອຍແຫ້ງນໍ

(ກາຟັງຄຳຂອງນົກຄຸ່ມນັ້ນແລ້ວ ໄດ້ກ່າວວ່າ)

[໑໔໗] ເມື່ອກາຢູ່ໃນທ່າມກາງສັດຕູ
ສະແຫວງຫາເຫຍື່ອຢູ່ໃນໝູ່ສັດຕູນັ້ນ
ມີໃຈຢ້ານກົວຢູ່ເປັນນິດ
ຈະຫາຄວາມໝັ້ນໃຈໄດ້ແນວໃດ

[໑໓໐] ພວກກາມີໃຈຢ້ານກົວຢູ່ເປັນນິດ
ໄດ້ກ້ອນເຂົ້າມາດ້ວຍກຳອັນຊົ່ວຊ້າ ຈຶ່ງບໍ່ອີ່ມໜຳ
ທ້າວນົກຄຸ່ມ ຍ້ອນເຫດນັ້ນ ເຮົາຈຶ່ງຈ່ອຍແຫ້ງ

[໑໓໑] ທ້າວນົກຄຸ່ມ ເຈົ້າກິນຫຍ້າແລະພືດຢ່າງຊົ່ວມີໂອຊາໜ້ອຍ
ແຕ່ເປັນຫຍັງທ່ານຈຶ່ງອ້ວນພີນໍ

(ນົກຄຸ່ມໂພທິສັດບອກເຫດທີ່ຕົວເອງອ້ວນວ່າ)

[໑໓໒] ພວກນົກຄຸ່ມມັກໜ້ອຍຍ້ອນບໍ່ຄິດເລື້ອງອາຫານ
ແລະບໍ່ຕ້ອງໄປຫາກິນໄກ ລ້ຽງຊີບດ້ວຍອາຫານຕາມມີຕາມໄດ້
ກາເອີຍ ຍ້ອນເຫດນັ້ນ ເຮົາຈຶ່ງອ້ວນພີ

[໑໓໓] ຍ້ອນຄົນມີຄວາມມັກໜ້ອຍ ມີຄວາມສຸກ
ບໍ່ຕ້ອງພະວົງເລື້ອງອາຫານ
ກິນອາຫານທີ່ເໝາະສົມພໍປະມານ
ກໍຈະດຳເນີນຊີວິດໃຫ້ເກີດຄວາມສຸກໄດ້

**ວັດຕະກະຊາດົກທີ ໗ ຈົບ**

## ໑໐. ມະນິຊາດົກ (໓໗໔)
## ວ່າດ້ວຍກາຖືກກະເບື້ອງແຂວນຄໍແທນແກ້ວມະນີ

(ນົກກາງແກໂພທິສັດເຫັນກາແລ້ວເມື່ອຈະເຍີ້ຍຫຍັນ ຈຶ່ງກ່າວວ່າ)

[໑໓໔] ນານແລ້ວນໍ ເຮົາຫາກໍ່ຈະໄດ້ເຫັນເພື່ອນປະດັບແກ້ວມະນີ
ເພື່ອນຂອງເຮົາໃຫ້ຊ່າງຕົກແຕ່ງຂົນປາກງາມແທ້ນໍ

(ກາໄດ້ຟັງດັ່ງນັ້ນ ຈຶ່ງໄດ້ກ່າວວ່າ)

[໑໓໕] ເຮົາມົວຍຸ້ງຢູ່ກັບງານຣາດຊະການ

ເລັບແລະຂົນປີກຈຶ່ງງອກຍາວສົກກະປົກ
ເປັນເວລານານຈຶ່ງໄດ້ຊ່າງຕັດຜົມ
ລົກອອກສາຈົນໝົດໃນວັນນີ້

(ນົກກາງແກໂພທິສັດກ່າວວ່າ)

[໑໖໓] ເຈົ້າໄດ້ຊ່າງຕັດຜົມທີ່ຫາໄດ້ຍາກແລ້ວໃຫ້ລົກຂົນອອກໄປ
ເພື່ອນເອີຍ ເມື່ອເປັນແນວນັ້ນ
ອັນໃດນໍ? ສິ່ງສຽງດັງກະຣິ່ງ ໆ ຢູ່ທີ່ຄໍຂອງທ່ານ

(ກາໄດ້ກ່າວວ່າ)

[໑໖໗] ຜູ້ດີທັງຫຼາຍຫ້ອຍແກ້ວມະນີໄວ້ທີ່ຄໍ
ເຮົາຮຽນແບບພວກເຂົາ
ເຈົ້າຢ່າເຂົ້າໃຈວ່າ ເຮົາເຮັດຫຼິ້ນ

[໑໖໘] ແມ່ນຫາກເຈົ້າພໍໃຈການຕົກແຕ່ງຂົນປາກ
ທີ່ນາຍຊ່າງຕົກແຕ່ງໄດ້ຢ່າງສວຍງາມແນວນີ້
ເພື່ອນເອີຍ ເຮົາຈະໃຫ້ເຂົາຊ່ວຍຕົກແຕ່ງໃຫ້ທ່ານ
ແລະແກ້ວມະນີເຮົາກໍຈະມອບໃຫ້ທ່ານ

(ນົກກາງແກໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໖໙] ທ່ານທີ່ນັ້ນສົມຄວນແກ່ແກ້ວມະນີ
ແລະການຕົກແຕ່ງຂົນປາກຢ່າງສວຍງາມ
ການບໍ່ເຫັນທ່ານເປັນທີ່ພໍໃຈຂອງເຮົາ
ເຮົາຂໍລາທ່ານໄປກ່ອນ

**ມະນີຊາດົກທີ ໑໐ ຈົບ**

**ຂະຣະປຸດຕະວັກທີ ໘ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ຂະຣະປຸດຕະຊາດົກ

໘. ສູຈິຊາດົກ

## ລວມວັກທີ່ມີໃນນິບາດນີ້ ຄື



**ສັກກະນິບາດ ຈົບ**

# ໗. ສັດຕະກະນິບາດ

## ໑. ກຸກກຸວັກ

**ໝວດວ່າດ້ວຍມາດຕາວັດສອກ**

### ໑. ກຸກກຸຊາດົກ (໓໙໖)

**ວ່າດ້ວຍມາດຕາວັດສອກ**

(ພຣະຣາຊາຕັດຖາມພຣະໂພທິສັດວ່າ)

[໑] ຊໍ່ຟ້າສູງສອກເຄິ່ງ ໂດຍຮອບກວ້າງປະມານ ໘ ຄືບ
ຊໍ່ຟ້ານັ້ນເຮັດດ້ວຍແກ່ນໄມ້ສີສຽດ ບໍ່ມີມອກ
ຕັ້ງຢູ່ເທິງອັນໃດ ຈຶ່ງບໍ່ຕົກລົງມາຈາກຂ້າງເທິງ

(ພຣະໂພທິສັດທູນຕອບວ່າ)

[໒] ຊໍ່ຟ້າທີ່ຈັນທັນ ໓໐ ຕົວ ເຊິ່ງເຮັດດ້ວຍໄມ້ແກ່ນບໍ່ກົງ
ວາງລຽງຮາຍໄວ້ສະເໝີກັນ ຄ້ຳຍັນໄວ້ ແລະຕິດແໜ້ນຢ່າງແຂງແຮງ
ຕັ້ງຢູ່ສະເໝີກັນ ຈຶ່ງບໍ່ຕົກລົງມາຈາກຂ້າງເທິງ

[໓] ແມ່ນພຣະຣາຊາຜູ້ຊົງພຣະປັຊາກໍເຊັ່ນກັນ ມີມິດໄມຕີທີ່ສະນິດ
ເປັນຄົນສະອາດບໍ່ແຕກແຍກ ສົງເຄາະດ້ວຍດີ
ຍ່ອມບໍ່ເຄື່ອນໄປຈາກສິຣິເໝືອນຊໍ່ຟ້າທີ່ຈັນທັນຊ່ອຍຢຶດໄວ້

[໔] ຄົນມີມີດ ເມື່ອບໍ່ປອກໝາກເວີ່ທີ່ມີເປືອກແຂງອອກ
ກໍຍ່ອມເຮັດໃຫ້ມີຣົດຂົມ ເມື່ອປອກເປືອກອອກກໍຈະເຮັດໃຫ້ມີຣົດດີຂຶ້ນ
ຂໍເດຊະ ແຕ່ເມື່ອປອກເປືອກບາງອອກກໍຈະເຮັດໃຫ້ຣົດບໍ່ດີ ຂໍ້ນີ້ສັນໃດ

[໕] ແມ່ນພຣະຣາຊາຜູ້ຊົງພຣະປີຊາກໍສັນນັ້ນ
ບໍ່ຊົງບີບຄັ້ນຊາວບ້ານ ຊົງລວບລວມພຣະຣາດຊະຊັບ
ປະຕິບັດພຣະຣາດຊະພາຣະກິດຕາມທຳນອງຄອງທຳ
ຊົງເຮັດແຕ່ຄວາມຈະເລີນ ບໍ່ຊົງບຽດບຽນຜູ້ອື່ນ

[໖] ບົວມີຣາກຂາວເກີດແຕ່ນ້ຳສະອາດໃນສະໂບກຂະຣະນີ
ຕົມ ຝຸ່ນລະອອງ ແລະນ້ຳ
ຍ່ອມບໍ່ຕິດດອກບົວທີ່ບານເພາະດວງອາທິດ ສັນໃດ

[໗] ພຣະຣາຊາຜູ້ມີຄວາມສະອາດໃນການພິຈາລະນາຄະດີ ບໍ່ຊົງຫຸນຫັນ
ມີວຽກງານບໍລິສຸດ ປາສະຈາກບາບກໍສັນນັ້ນຄືກັນ
ກຳກິເລດຍ່ອມບໍ່ແປດເປື້ອນ
ເພາະພຣະຣາຊາເຊັ່ນນັ້ນປຽບເໝືອນບົວທີ່ເກີດແລ້ວໃນສະໂບກຂະຣະນີ

**ກຸກກຸຊາດົກທີ ໑ ຈົບ**

## ໘. ມະໂນຊະຊາດົກ (໓໙໗)

## ວ່າດ້ວຍຣາດຊະສີມະໂນຊະ

(ໝາຈອກຜາຣົບກັບຕົນເອງວ່າ)

[໘] ຍ້ອນຄັນທະນູໂກ່ງແລະສາຍທະນູສົ່ງສຽງດັງ
ພະຍາເນື້ອມະໂນຊະສະຫາຍຂອງເຮົາຈຶ່ງຖືກຂ້າ
[໙] ທາງທີ່ດີ ເຮົາຈະໜີເຂົ້າປ່າໄປຕາມສະບາຍສາແຕ່ດ່ຽວນີ້ແລ
ຜູ້ທີ່ຕາຍແລ້ວເຊັ່ນນີ້ເປັນເພື່ອນກັນບໍ່ໄດ້
ເຮົາເມື່ອຍັງມີຊີວິດຢູ່ຕ້ອງໄດ້ເພື່ອນໃໝ່

(ພໍ່ຣາດຊະສີມະໂນຊະກ່າວວ່າ)

[໑໐] ຜູ້ທີ່ຄົບຄົນຊົ່ວ ຍ່ອມບໍ່ໄດ້ຮັບຄວາມສຸກຢ່າງແທ້ຈິງ
ເບິ່ງເທີ້ນ ເຈົ້າມະໂນຊະນອນຕາຍເພາະຄຳສັ່ງສອນຂອງໝາຈອກຄິຣິຍະ

(ແມ່ຣາດຊະສີມະໂນຊະກ່າວວ່າ)

[໑໑] ແມ່ບໍ່ຍິນດີເລີຍ ລູກຄົບຄົນຊົ່ວ
ຈົ່ງເບິ່ງເທີ້ນເຈົ້າມະໂນຊະນອນຕາຍຈົມກອງເລືອດຂອງຕົນເອງ

(ນ້ອງສາວຣາດຊະສີມະໂນຊະກ່າວວ່າ)

[໑໔] ບຸກຄົນຜູ້ບໍ່ເຮັດນຳຄຳເວົ້າຂອງຜູ້ເກື້ອກູນແນະປະໂຫຍດ
ຕ້ອງເປັນເຊັ່ນນີ້ ແລະປະສົບແຕ່ຄວາມຊົ່ວ

(ເມຍຣາດຊະສີມະໂນຊະກ່າວວ່າ)

[໑໓] ຜູ້ທີ່ເປັນຄົນຊັ້ນສູງແຕ່ມາຄົບຄົນຊັ້ນຕ່ຳ
ຍ່ອມເປັນຄົນຊົ່ວກວ່າຄົນຊັ້ນຕ່ຳນັ້ນເສຍອີກ
ຈົ່ງເບິ່ງເທີ້ນ ພະຍາເນື້ອຊັ້ນສູງມາຄົບໝາຈອກຊັ້ນຕ່ຳ
ຖືກກຳລັງລູກສອນກຳຈັດແລ້ວດ້ວຍປະການດັ່ງນີ້

(ພຣະຜູ້ມີພຣະພາກຕັດວ່າ)

[໑໔] ຄົນຄົບຄົນຊົ່ວກໍຊົ່ວນຳ
ຄົນຄົບຄົນສະເໝີກັນຍ່ອມບໍ່ເສື່ອມໃນການໃດ ໆ
ການຄົບຄົນທີ່ດີກວ່າຍ່ອມຈະເລີນໄວ
ຍ້ອນເຫດນັ້ນ ຈົ່ງຄົບຄົນທີ່ດີກວ່າຕົນເທີ້ນ

**ມະໂນຊະຊາດົກທີ ໔ ຈົບ**

## ໓. ສຸຕະນະຊາດົກ (໓໖໘)
## ວ່າດ້ວຍສຸຕະນະໂພທິສັດ

(ພຣະໂພທິສັດກ່າວວ່າ)

[໑໕] ທ່ານມະຄະເທບຜູ້ສະຖິດຢູ່ທີ່ຕົ້ນໄຮນີ້
ພຣະຣາຊາຊົງສົ່ງພັດຕາຫານທີ່ປຸງດ້ວຍຊີ້ນທີ່ສະອາດຕະມາໃຫ້ທ່ານ
ທ່ານຈົ່ງອອກມາບໍຣິໂພກເທີ້ນ

(ຍັກກ່າວວ່າ)

[໑໕]　　ມາເທີ້ນມານົບ ຈົ່ງວາງພັກສາຫານທີ່ພຽບພ້ອມດ້ວຍກັບເຂົ້າລົງ
ມານົບ ເຈົ້າກໍຈະເປັນພັກສາຫານ ຈັດເປັນພັກສາຫານທັງ ໔ ຢ່າງ

(ພຣະໂພທິສັດກ່າວວ່າ)

[໑໖]　　ຍັກ ທ່ານຈະລະຖິ້ມປະໂຫຍດອັນຍິ່ງໃຫຍ່ຍ້ອນເຫດພຽງເລັກໜ້ອຍ
ຊົນທັງຫຼາຍທີ່ຫວາດຣະແວງຄວາມຕາຍຈັກບໍ່ນຳພັກສາຫານມາໃຫ້ທ່ານ
[໑໗]　　ນີ້ຍັກ ທ່ານຈັກໄດ້ພັກສາຫານທີ່ສະອາດ ປະນີດ
ມີຣົດແຊບເປັນປະຈຳທຸກວັນ
ກໍເມື່ອທ່ານກິນເຮົາສາແລ້ວ
ຄົນທີ່ຈະນຳພັກສາຫານມາໃຫ້ທ່ານໃນທີ່ນີ້ຈັກຫາໄດ້ຍາກຢ່າງຍິ່ງ

(ຍັກກ່າວວ່າ)

[໑໘]　　ທ້າວສຸຕະນະ ເນື້ອຄວາມຕາມທີ່ທ່ານເວົ້າ
ເປັນປະໂຫຍດແກ່ເຮົາຢ່າງແນ່ນອນ
ເຮົາອະນຸຍາດທ່ານ
ຂໍໃຫ້ທ່ານຈົ່ງກັບໄປພົບມານດາໂດຍຄວາມປອດໄພເທີ້ນ
[໔໐]　　ທ້າວມານົບ ທ່ານຈົ່ງນຳພຣະຂັນ ສະເຫວດຕະສັດ ແລະຖາດໄປນຳ
ຂໍມານດາຂອງທ່ານຈົ່ງພົບຄວາມປອດໄພ
ແລະຂໍໃຫ້ທ່ານຈົ່ງພົບມານດາ

(ພຣະໂພທິສັດກ່າວວ່າ)

[໔໑]　　ນີ້ຍັກ ຂໍທ່ານພ້ອມກັບໝູ່ຍາດທັງໝົດ
ຈົ່ງເປັນສຸກເຊັ່ນກັນເທີ້ນ ເຮົາກໍໄດ້ຊັບແລ້ວ
ແລະເຮົາກໍທຳຕາມພຣະຣາດຊະໂອງການແລ້ວ

**ສຸຕະນະຊາດົກທີ ໓ ຈົບ**

## ໔. ມາຕຸໂປສະກະຄິຊະນະຊາດົກ (໓໙໘)
## ວ່າດ້ວຍພະຍາແຮ້ງໂພທິສັດລ້ຽງມານດາ

(ແຮ້ງລຳພຶງລຳພັນວ່າ)

[໔໔]　　ພໍ່ແມ່ຂອງເຮົາແກ່ເຖົ້າອາໄສຢູ່ທີ່ຮ່ອມພູ

ຈັກເຮັດແນວໃດບໍ
ເຮົາກໍຖືກບ້ວງ ຕົກຢູ່ໃນອຳນາດຂອງນາຍພານນິລິຍະ

(ລູກນາຍພານຖາມວ່າ)

[໔໓] ນີ້ ນົກແຮ້ງ ເຈົ້າກຳລັງຄ່ຳຄວນບໍ
ຄ່ຳຄວນໄປເຮັດຫຍັງ ເຮົາບໍ່ເຄີຍໄດ້ຍິນ
ບໍ່ເຄີຍເຫັນນົກທີ່ເວົ້າພາສາມະນຸດໄດ້

(ແຮ້ງຕອບວ່າ)

[໔໔] ເຮົາລ້ຽງພໍ່ແມ່ຜູ້ແກ່ເຖົ້າເຊິ່ງອາໄສຢູ່ທີ່ຮ່ອມພູ
ທ່ານທັງ ໔ ນັ້ນຈັກເຮັດແນວໃດບໍ
ຍ້ອນເຮົາຕົກຢູ່ໃນອຳນາດຂອງທ່ານສາແລ້ວ

(ລູກນາຍພານກ່າວວ່າ)

[໔໕] ທຳມະດານົກແຮ້ງຍ່ອມເຫັນຊາກສົບໄດ້
ໄກເຖິງຮ້ອຍໂຍດບໍ່ແມ່ນບໍ
ຍ້ອນເຫດໃດ ເຈົ້າແມ່ນມາໃກ້ຕາໜ່າງແລະບ້ວງແລ້ວກໍບໍ່ຮູ້

(ແຮ້ງກ່າວວ່າ)

[໔໖] ເມື່ອໃດສັດມີຄວາມເສື່ອມໃນຂະນະຈະສິ້ນຊີວິດ
ເມື່ອນັ້ນເຖິງຈະມາໃກ້ຕາໜ່າງແລະບ້ວງກໍບໍ່ຮູ້

(ລູກນາຍພານກ່າວວ່າ)

[໔໗] ເຈົ້າຈົ່ງລ້ຽງພໍ່ແມ່ຜູ້ແກ່ເຖົ້າເຊິ່ງອາໄສຢູ່ທີ່ຮ່ອມພູຕໍ່ໄປເທີ້ນ
ເຮົາອະນຸຍາດ ເຈົ້າຈົ່ງກັບໄປພົບພວກຍາດໂດຍຄວາມປອດໄພເທີ້ນ

(ແຮ້ງກ່າວວ່າ)

[໔໘] ເມື່ອເປັນແນວນັ້ນ ນາຍພານ
ຂໍທ່ານຈົ່ງບັນເທີງໃຈພ້ອມກັບໝູ່ຍາດທັງໝົດເທີ້ນ
ເຮົາຈັກລ້ຽງພໍ່ແມ່ຜູ້ແກ່ເຖົ້າເຊິ່ງອາໄສຢູ່ທີ່ຮ່ອມພູ

**ມາຕຸໂປສະກະຄິຊະນະຊາດົກທີ ໔ ຈົບ**

# ໕. ທັບພະປຸບຜະຊາດົກ (໔໐໐)
## ວ່າດ້ວຍໝາຈອກຊື່ທັບພະປຸບຜະ

(ນາກທີ່ທ່ຽວໄປໃນນ້ຳເລິກເວົ້າກັບນາກທີ່ທ່ຽວໄປຕາມແຄມຝັ່ງວ່າ)

[໔໙] ເພື່ອນຜູ້ຈະເລີນ ເພື່ອນຜູ້ທ່ຽວໄປຕາມແຄມຝັ່ງ
ຈົ່ງແລ່ນຕາມເຮົາມາເທີ້ນ ເຮົາຫາປາໃຫຍ່ໄດ້ແລ້ວ
ມັນພາເຮົາໄປຢ່າງວ່ອງໄວ

(ນາກທີ່ທ່ຽວໄປຕາມແຄມຝັ່ງເວົ້າວ່າ)

[໕໐] ເພື່ອນຜູ້ຈະເລີນ ເພື່ອນຜູ້ທ່ຽວໄປໃນນ້ຳເລິກ
ຈົ່ງຈັບມັນໄວ້ໃຫ້ໝັ້ນຄົງດ້ວຍກຳລັງ
ເຮົາຈະຍົກມັນຂຶ້ນມາເໝືອນນົກຄຸດເອີ້ນລົງຈັບງູຂຶ້ນ

(ນາກທັງ ໒ ເວົ້າກັບໝາຈອກວ່າ)

[໕໑] ພວກເຮົາເກີດວິວາທະກັນຂຶ້ນ ພໍ່ທັບພະປຸບຜະຈົ່ງຟັງເຮົາ
ເພື່ອນຈົ່ງຣະງັບຄວາມຜິດຖຽງກັນ ຂໍຄວາມວິວາທະຈົ່ງສະງົບໄປ

(ໝາຈອກກ່າວວ່າ)

[໕໒] ເມື່ອກ່ອນເຮົາເປັນຜູ້ຕັ້ງຢູ່ໃນທຳ ພິຈາລະນາຄະດີມາແລ້ວຫຼວງຫຼາຍ
ເພື່ອນ ເຮົາຈະຣະງັບຄວາມຜິດຖຽງກັນ ຄວາມວິວາດກັນຈົ່ງສະງົບໄປ

[໕໓] ນາກຕົວທີ່ທ່ຽວໄປຕາມແຄມຝັ່ງຈົ່ງເອົາຫາງໄປ
ຕົວທີ່ທ່ຽວໄປໃນນ້ຳເລິກຈົ່ງເອົາຫົວໄປ
ສ່ວນທ່ອນກາງນີ້ຕົກເປັນຂອງເຮົາຜູ້ຕັ້ງຢູ່ໃນທຳ

(ນາກທັງ ໒ ເວົ້າກັນວ່າ)

[໕໔] ຖ້າເຮົາບໍ່ຜິດຖຽງກັນ ຈັກມີອາຫານໄປດົນນີ້
ໝາຈອກຄາບເອົາປາວຽນໄພທີ່ບໍ່ແມ່ນທ່ອນຫົວທ່ອນຫາງໄປສາແລ້ວ

(ເມຍໝາຈອກຖາມວ່າ)

[໓໕] ວັນນີ້ເຮົາຍິນດີເພາະເຫັນຜິວມີໜ້າເບີກບານ
ເໝືອນຂັດຕິຍະຣາດຊີງຍິນດີເພາະໄດ້ຣາດຊະສົມບັດ

[໓໖] ເປັນຫຍັງນໍ ທ່ານເກີດຢູ່ເທິງບົກຈຶ່ງຫາປາໃນນ້ຳໄດ້
ນີ້ທ່ານຜູ້ຮ່ວມຊີວິດ ເຮົາຖາມແລ້ວໂຜດບອກ ທ່ານໄດ້ມາແນວໃດ?

(ໝາຈອກຕອບວ່າ)

[໓໗] ຍ້ອນການຜິດຖຽງກັນ ສັດຈຶ່ງຜ່າຍຜອມ ຊັບຈຶ່ງສິ້ນໄປ
ພວກນາກເສື່ອມຍ້ອນການຜິດຖຽງກັນ
ແມ່ມາຍາວີ ທ່ານຈົ່ງກິນປາວຽນໄຟເທີ້ນ

[໓໘] ໃນໝູ່ມະນຸດກໍເຊັ່ນດຽວກັນ ເກີດການຜິດຖຽງໃນບ່ອນໃດ
ກໍຈະພາກັນໄປຫາຜູ້ຕັ້ງຢູ່ໃນທຳໃນບ່ອນນັ້ນ
ຜູ້ພິຈາລະນາຄະດີນັ້ນເປັນຜູ້ຕັດສິນໃຫ້ພວກເຂົາ
ໃນການຜິດຖຽງນັ້ນກໍຈະພາກັນໝົດສິ້ນຊັບໄປ
ພຣະຄັງຫຼວງກໍຈະເພີ່ມພູນ

**ທັບພະປຸບຜະຊາດົກທີ ໕ ຈົບ**

## ໖. ທະສັນນະກະຊາດົກ (໔໐໑)
## ວ່າດ້ວຍດາບແຄວັນທະສັນນະກະ

(ພຣະຣາຊາຕັດຖາມອາຍຸຣະບັນດິດວ່າ)

[໓໙] ດາບແຄວັນທະສັນນະກະຄົມກິບດື່ມເລືອດຂອງຄົນທີ່ຖືກຕ້ອງ
ຊາຍຜູ້ນີ້ກືນເຂົ້າໄປໄດ້ທ່າມກາງຊຸມຊົນ
ເຫດອື່ນໃດທີ່ເຮັດໄດ້ຍາກກວ່ານັ້ນມີຢູ່ບໍ
ເຮົາຖາມແລ້ວ ຈົ່ງບອກເຫດນັ້ນ

(ອາຍຸຣະບັນດິດທູນຕອບວ່າ)

[໔໐] ຊາຍຜູ້ນີ້ກືນດາບຄົມກິບທີ່ດື່ມເລືອດຂອງຄົນທີ່ຖືກຕ້ອງເຂົ້າໄປໄດ້
ຍ້ອນຄວາມໂລບ ແຕ່ຜູ້ໃດເວົ້າວ່າຈະໃຫ້
ຄຳເວົ້າຂອງເຂົາເຮັດໄດ້ຍາກກວ່າການກືນດາບນັ້ນ

ເຫດຢ່າງອື່ນທັງໝົດເຮັດໄດ້ງ່າຍ
ຂໍເດຊະພຣະເຈົ້າມັດທະວະຜູ້ສົມມຸດຕິເທບ
ຂໍພຣະອົງຊົງຮູ້ແນວນີ້

(ພຣະຣາຊາຕັດຖາມປຸກກຸສະບັນດິດວ່າ)

[໔໑] ອາຍຸຣະບັນດິດຜູ້ສະຫຼາດໃນທຳໄດ້ແກ້ເນື້ອຄວາມແຫ່ງບັນຫາແລ້ວ
ບັດນີ້ເຮົາຈະຖາມທ່ານປຸກກຸສະບັນດິດແດ່
ເຫດອື່ນໃດທີ່ເຮັດໄດ້ຍາກກວ່ານັ້ນມີຢູ່ບໍ
ເຮົາຖາມແລ້ວ ທ່ານຈົ່ງບອກເຫດນັ້ນ

(ປຸກກຸສະບັນດິດທູນຕອບວ່າ)

[໔໒] ວາຈາທີ່ເປ່ງອອກມາຄືນອາໄສບໍ່ໄດ້ ບໍ່ມີຜືນ
ແຕ່ຜູ້ໃດໃຫ້ແລ້ວບໍ່ຕິດໃຈ ການກະທຳຂອງຜູ້ນັ້ນເຮັດໄດ້ຍາກກວ່ານັ້ນ
ເຫດອື່ນທັງໝົດເຮັດໄດ້ງ່າຍ ຂໍເດຊະພຣະເຈົ້າມັດທະວະຜູ້ສົມມຸດຕິເທບ
ຂໍພຣະອົງຊົງຮູ້ແນວນີ້

(ພຣະຣາຊາຕັດຖາມເສນະກະບັນດິດວ່າ)

[໔໓] ປຸກກຸສະບັນດິດຜູ້ສະຫຼາດໃນທຳໄດ້ແກ້ເນື້ອຄວາມແຫ່ງບັນຫາແລ້ວ
ບັດນີ້ເຮົາຈະຖາມທ່ານເສນະກະບັນດິດແດ່
ເຫດອື່ນໃດທີ່ເຮັດໄດ້ຍາກກວ່ານັ້ນມີຢູ່ບໍ
ເຮົາຖາມແລ້ວ ທ່ານຈົ່ງບອກເຫດນັ້ນ

(ເສນະກະບັນດິດທູນຕອບວ່າ)

[໔໔] ທານຈະໜ້ອຍຫຼືຫຼາຍກໍຕາມ ຄົນກໍຄວນຈະໃຫ້
ແຕ່ວ່າຜູ້ໃດເມື່ອໃຫ້ແລ້ວ ພາຍຫຼັງບໍ່ເດືອດຮ້ອນ
ການໃຫ້ຂອງຜູ້ນັ້ນເຮັດໄດ້ຍາກກວ່າ
ເຫດອື່ນທັງໝົດເຮັດໄດ້ງ່າຍ ຂໍເດຊະພຣະເຈົ້າມັດທະວະຜູ້ສົມມຸດຕິເທບ
ຂໍພຣະອົງຊົງຮູ້ແນວນີ້

(ພຣະຣາຊາຕັດສະດຸດີພຣະໂພທິສັດວ່າ)

[໔໕] ຕາມທີ່ເສນະກະບັນດິດກ່າວມາຍ່ອມຄອບຄຸມບັນຫາທຸກຂໍ້

ອາຍຸຣະບັນດິດແລະປຸກກຸສະບັນດິດໄດ້ກ່າວແກ້ແລ້ວ

**ທະສັນນະກະຊາດົກທີ ໖ ຈົບ**

## ໗. ເສນະກະຊາດົກ (໔໐໘)

## ວ່າດ້ວຍເສນະກະບັນດິດ

(ເສນະກະບັນດິດກ່າວວ່າ)

[໔໖] ທ່ານມີຈິດຟຸ້ງຊ່ານ ມີດວງຕາບອບຊ້ຳ
ຢາດນ້ຳຕາກໍໄຫຼອອກມາຈາກໜ່ວຍຕາທັງ ໔ ຂອງທ່ານ
ອັນໃດຂອງທ່ານເສຍບໍ ທ່ານຕ້ອງການອັນໃດຈຶ່ງມາບ່ອນນີ້
ພໍ່ພາມ ເຊີນເວົ້າມາເທີ້ນ

(ພາມກ່າວວ່າ)

[໔໗] ວັນນີ້ ເມື່ອຂ້າພະເຈົ້າໄປເຖິງບ້ານ ພັນລະຍາຕ້ອງຕາຍ
ເມື່ອໄປບໍ່ເຖິງບ້ານ ຂ້າພະເຈົ້າຕ້ອງຕາຍ ເທວະດາບອກໄວ້
ຍ້ອນທຸກນີ້ ຂ້າພະເຈົ້າຈຶ່ງຫວາດກົວ
ທ່ານເສນະກະບັນດິດ ໂຜດບອກເຫດນີ້ແກ່ຂ້າພະເຈົ້າ

(ເສນະກະບັນດິດກ່າວວ່າ)

[໔໘] ຂ້າພະເຈົ້າພິຈາລະນາເຫດຫຼາຍປະການແລ້ວ
ກ່າວເຫດໃດໃນເຫດນີ້ ເຫດນັ້ນແນ່ນອນຈັກເປັນເລື້ອງຈິງ
ພໍ່ພາມ ຂ້າພະເຈົ້າເຂົ້າໃຈວ່າ ງູເຫົ່າໄດ້ເລືອເຂົ້າໄປ
ໃນຖົງເຂົ້າສັດຕຸຂອງທ່ານ ໂດຍທ່ານບໍ່ຮູ້ຕົວ

[໔໙] ທ່ານຈົ່ງເອົາທ່ອນໄມ້ເຄາະຖົງເບິ່ງເທີ້ນ
ຈະເຫັນງູມີລີ້ນສອງແສກ ມີນ້ຳລາຍຟູມປາກ
ທ່ານຈະຕັດຄວາມເຄືອບແຄງສົງໄສໄດ້ວັນນີ້
ທ່ານຈະໄດ້ເຫັນງູ ຈົ່ງແກ້ຖົງເທີ້ນ

(ພຣະສາດສະດາຕັດວ່າ)

[໕໐] ພາມນັ້ນມີທ່າທາງອະເຢືອງຢູ່

ໄດ້ແກ້ຖົງເຂົ້າອອກທ່າມກາງຊຸມຊົນ
ໃນຂະນະນັ້ນ ງູຮ້າຍມີພິດແຮງເລືອອອກມາແຜ່ພັງພານ

(ພາມກ່າວສະດຸດີພຣະຣາຊາວ່າ)

[໕໑] ພຣະເຈົ້າຊະນົກຊົງໄດ້ລາບດີແລ້ວທີ່ໄດ້ຊົງພົບເສນະກະຜູ້ມີປັນຍາດີ
ພາມ ທ່ານເປີດເຜີຍຂໍ້ທີ່ປົກປິດໄດ້ນໍ
ເຫັນທຸກສິ່ງທຸກຢ່າງ
ຍານຂອງທ່ານມີກຳລັງຫຼາຍ

(ພາມຕ້ອງການຈະສະດຸດີເສນະກະບັນດິດ ຈຶ່ງກ່າວວ່າ)

[໕໘] ຂ້າພະເຈົ້າມີຊັບຢູ່ ໗໐໐ ກະຫາປະນະນີ້
ເຊີນຮັບໄປທັງໝົດເທີ້ນ ຂ້າພະເຈົ້າໃຫ້ທ່ານ
ເພາະຂ້າພະເຈົ້າໄດ້ຊີວິດໃນວັນນີ້ກໍຍ້ອນທ່ານ
ຊ້ຳທ່ານຍັງໄດ້ທຳຄວາມປອດໄພແກ່ພັນລະຍາຂອງຂ້າພະເຈົ້ານຳ

(ເສນະກະບັນດິດກ່າວວ່າ)

[໕໙] ບັນດິດທັງຫຼາຍຍ່ອມບໍ່ຮັບຄ່າຈ້າງ
ເພາະຄາຖາອັນວິຈິດທີ່ກ່າວດີແລ້ວ ພໍ່ພາມ
ແຕ່ນີ້ໄປ ຂໍໃຫ້ຄົນທັງຫຼາຍຈົ່ງຊ່ອຍກັນໃຫ້ຊັບແກ່ທ່ານ
ທ່ານຈົ່ງນຳໄປສູ່ບ່ອນຢູ່ຂອງຕົນເທີ້ນ

**ເສນະກະຊາດົກທີ ໗ ຈົບ**

## ໘. ອັດຖິເສນະຊາດົກ (໔໐໓)
## ວ່າດ້ວຍອັດຖິເສນະລືສີ

(ພຣະຣາຊາຕັດຖາມລືສີອັດຖິເສນະວ່າ)

[໕໔] ພຣະຜູ້ເປັນເຈົ້າອັດຖິເສນະ ຂ້ານ້ອຍບໍ່ຮູ້ຈັກວະນິພົກພວກນີ້ເລີຍ
ແຕ່ພວກເຂົາໄດ້ພ້ອມໃຈກັນມາຂໍກັບຂ້ານ້ອຍ
ເປັນຫຍັງພຣະຜູ້ເປັນເຈົ້າຈຶ່ງບໍ່ຂໍຂ້ານ້ອຍແດ່

(ລືສີອັດຖິເສນະທູນຕອບວ່າ)

[໕໘] ຜູ້ຂໍຍ່ອມບໍ່ເປັນທີ່ຮັກ ຜູ້ບໍ່ໃຫ້ຂອງທີ່ຂໍກໍບໍ່ເປັນທີ່ຮັກ
ຍ້ອນເຫດນັ້ນ ອາຕະມາພາບຈຶ່ງບໍ່ຂໍມະຫາບໍພິດ
ຂໍຄວາມໝາງໃຈຢ່າໄດ້ມີແກ່ອາດຕະມາພາບເລີຍ

(ພຣະຣາຊາຕັດວ່າ)

[໕໙] ຜູ້ໃດລ້ຽງຊີບຢູ່ໄດ້ດ້ວຍການຂໍ
ບໍ່ຂໍສິ່ງທີ່ຄວນຂໍໃນການອັນຄວນ
ຜູ້ນັ້ນທຳລາຍຜູ້ອື່ນເສຍຈາກບຸນ
ທັງຕົນເອງກໍລ້ຽງຊີບຢູ່ບໍ່ໄດ້
[໕໗] ສ່ວນຜູ້ໃດລ້ຽງຊີບຢູ່ໄດ້ດ້ວຍການຂໍ
ຂໍສິ່ງທີ່ຄວນຂໍໃນການອັນຄວນ
ຜູ້ນັ້ນເຮັດຜູ້ອື່ນໃຫ້ໄດ້ບຸນ
ທັງຕົນເອງກໍລ້ຽງຊີບຢູ່ໄດ້

[໕໘] ຜູ້ມີປັນຍາທັງຫຼາຍເຫັນຍາຈົກມາແລ້ວບໍ່ຮັງກຽດ
ຂ້າແດ່ພຣະຜູ້ເປັນເຈົ້າຜູ້ປະພຶດພົມມະຈັນ
ພຣະຜູ້ເປັນເຈົ້າເປັນທີ່ຮັກຂອງຂ້ານ້ອຍ
ນິມົນພຣະຜູ້ເປັນເຈົ້າກ່າວຂໍສິ່ງທີ່ຕ້ອງການເທີ້ນ

(ລືສີອັດຖິເສນະທູນວ່າ)

[໕໙] ຜູ້ມີປັນຍາທັງຫຼາຍຍ່ອມບໍ່ຂໍເລີຍ
ສ່ວນນັກປາດຄວນຈະຮູ້ເອງ
ພຣະອະຣິຍະພຽງເຈາະຈົ່ງຢືນທໍ່ນັ້ນ
ນີ້ເປັນການຂໍຂອງພຣະອະຣິຍະ

(ພຣະຣາຊາຕັດວ່າ)

[໖໐] ທ່ານພາມ ຂ້ານ້ອຍຂໍຖວາຍງົວແດງ ໑,໐໐໐ ຕົວ
ພ້ອມກັບງົວຈ່າຝູງແກ່ທ່ານ
ຍ້ອນພຣະອະຣິຍະໄດ້ຟັງຄາຖາ
ອັນປະກອບດ້ວຍທຳຂອງພຣະຜູ້ເປັນເຈົ້າແລ້ວ
ຈະບໍ່ເພິ່ງຖວາຍແກ່ພຣະອະຣິຍະໄດ້ແນວໃດ

**ອັດຖິເສນະຊາດົກທີ ໘ ຈົບ**

# ໗. ກະປິຊາດົກ (໔໐໔)
## ວ່າດ້ວຍຄຸນສົມບັດຂອງຜູ້ບໍລິຫານໝູ່ຄະນະ

(ພຣະໂພທິສັດກ່າວໃຫ້ໂອວາດແກ່ຝູງລິງວ່າ)

[໕໑] ບັນດິດບໍ່ຄວນຢູ່ໃນສະຖານທີ່ທີ່ຄົນຄູ່ເວນກັນຢູ່
ຍ້ອນບຸກຄົນເມື່ອຢູ່ໃນລະຫວ່າງຄົນເປັນຄູ່ເວນກັນ
ຄືນໜຶ່ງຫຼືສອງຄືນກໍຕາມ ຍ່ອມຢູ່ເປັນທຸກ

[໕໒] ລິງຕົວທົວໜ້າມີຈິດໂລເລ ເພາະເຮັດຕາມລິງທີ່ມີຈິດໂລເລ
ມັນໄດ້ທຳຄວາມພິນາດໃຫ້ແກ່ຝູງ ຍ້ອນລິງຕົວດຽວເປັນເຫດ

[໕໓] ສັດໂງ່ແຕ່ສຳຄັນຕົນວ່າສະຫຼາດ ເປັນຜູ້ນຳຝູງ
ລຸອຳນາດໃຈຂອງຕົນເອງ
ກໍຈະຕ້ອງນອນຕາຍເໝືອນຢ່າງລິງຕົວນີ້

[໕໔] ສັດໂງ່ແຕ່ມີກຳລັງ ເປັນຜູ້ນຳຝູງບໍ່ດີ
ເພາະບໍ່ເກື້ອກູນແກ່ໝູ່ຍາດ
ເໝືອນນົກຕໍ່ບໍ່ເກື້ອກູນແກ່ ນົກທັງຫຼາຍ

[໕໕] ສ່ວນສັດສະຫຼາດມີກຳລັງເປັນຜູ້ນຳຝູງເປັນການດີ
ຍ້ອນວ່າເກື້ອກູນແກ່ໝູ່ຍາດ
ເໝືອນທ້າວວາສະວະເກື້ອກູນແກ່ໝູ່ເທບຊັ້ນດາວວະດຶງ

[໕໖] ສ່ວນຜູ້ໃດກວດເບິ່ງສິນ ປັນຍາ ແລະສຸຕະໃນຕົນ
ຜູ້ນັ້ນຍ່ອມປະພຶດປະໂຫຍດທັງ ໒ ຝ່າຍ
ຄື ທັງຕົນແລະຜູ້ອື່ນ

[໕໗] ຍ້ອນເຫດນັ້ນ ນັກປາດເພິ່ງກວດເບິ່ງຕົນ
ເໝືອນກວດເບິ່ງສິນ ປັນຍາ ແລະສຸຕະ
ແລ້ວໃຊ້ບໍລິຫານໝູ່ຄະນະແດ່ ປະຕິບັດຢູ່ລຳພັງຜູ້ດຽວແດ່

**ກະປິຊາດົກທີ ໗ ຈົບ**

# ໑໐. ພະກະພິມຊາດົກ (໔໐໕)
## ວ່າດ້ວຍພົຕແລະສິນຂອງ ພະກະພົມ

(ພະກະພົມຂາບທູນພຣະຜູ້ມີພຣະພາກເຈົ້າວ່າ)

[໕໗] ຂ້າແດ່ພຣະໂຄດົມ ພວກຂ້າພຣະອົງທັງ ໗໔ ຄົນ
ໄດ້ທຳບຸນໄວ້ ມີອຳນາດ ພົ້ນຊາດແລະຊະຣາ
ການເຖິງຄວາມເປັນພົມນີ້ເປັນຊາດສຸດທ້າຍ ສຳເລັດດ້ວຍພຣະເວດ
ຊົນທັງຫຼາຍບໍ່ແມ່ນໜ້ອຍກ່າວນະມັດສະການພວກຂ້າພຣະອົງ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໕໙] ທ້າວພະກະພົມ ທ່ານສຳຄັນອາຍຸໃດວ່າຍືນຍາວ
ຄວາມຈິງອາຍຸນັ້ນໜ້ອຍ ບໍ່ຍືນຍາວເລີຍ
ເຮົາຕະຖາຄົດຮູ້ຢ່າງແຈ່ມແຈ້ງ
ເຖິງອາຍຸ ໑໐໐,໐໐໐ ນິຣັບພຸດທະຂອງທ່ານ

(ພະກະພົມຂາບທູນວ່າ)

[໗໐] ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ພຣະອົງຕັດວ່າ
ເຮົາຕະຖາຄົດເປັນຜູ້ເຫັນບໍ່ມີບ່ອນສິ້ນສຸດ
ພົ້ນຊາດ ຊະຣາ ແລະຄວາມໂສກໄດ້ແລ້ວ
ພົດແລະສິນຄັ້ງກ່ອນຂອງຂ້າພຣະອົງເປັນແນວໃດ
ຂໍພຣະອົງຈົ່ງຕັດບອກພົດແລະສິນ
ທີ່ຂ້າພຣະອົງຄວນຈະຮູ້ແກ່ຂ້າພຣະອົງ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໗໑] ທ່ານໄດ້ຊ່ອຍໃຫ້ມະນຸດເປັນຈຳນວນຫຼາຍທີ່ມີຄວາມກະຫາຍ
ຖືກຄວາມຮ້ອນແຜດເຜົາໃຫ້ໄດ້ດື່ມນ້ຳ
ນັ້ນເປັນພົດແລະສິນຄັ້ງກ່ອນຂອງທ່ານ
ເຮົາຕະຖາຄົດຣະນຶກໄດ້ເໝືອນຫຼັບແລ້ວຕື່ນຂຶ້ນມາ

[໗໔] ການທີ່ທ່ານໄດ້ປ່ອຍໝູ່ຊົນເຊິ່ງຖືກຈັບທີ່ຝັ່ງແມ່ນ້ຳເອນີນຳໄປເປັນຊະເລີຍ
ນັ້ນເປັນພົດແລະສິນຄັ້ງກ່ອນຂອງທ່ານ
ເຮົາຕະຖາຄົດຣະນຶກໄດ້ເໝືອນຫຼັບແລ້ວຕື່ນຂຶ້ນມາ

[໗໖]  ທ່ານໃຊ້ກຳລັງເຂົ້າຂົ່ມ ໄດ້ປົດປ່ອຍເຮືອທີ່ພະຍານາກດຸຮ້າຍ
ຍຶດໄວ້ທີ່ກະແສແມ່ນ້ຳຄົງຄາຍ້ອນຕ້ອງການຈະທຳລາຍມະນຸດ
ນັ້ນເປັນພົດແລະສິນຄັ້ງກ່ອນຂອງທ່ານ
ເຮົາຕະຖາຄົດຣະນຶກໄດ້ເໝືອນຫຼັບແລ້ວຕື່ນຂຶ້ນມາ

[໗໘]  ອັນໜຶ່ງ ເຮົາຕະຖາຄົດໄດ້ເຄີຍເປັນສິດຂອງທ່ານຊື່ວ່າກັບປະ
ສຳຄັນທ່ານວ່າມີປັນຍາ ປະກອບດ້ວຍຂໍ້ວັດປະຕິບັດ
ນັ້ນເປັນພົດແລະສິນຄັ້ງກ່ອນຂອງທ່ານ
ເຮົາຕະຖາຄົດຣະນຶກໄດ້ເໝືອນຫຼັບແລ້ວຕື່ນຂຶ້ນມາ

(ພະກະພົມກ່າວສະດຸດີພຣະຜູ້ມີພຣະພາກເຈົ້າວ່າ)

[໗໕]  ອາຍຸຂອງຂ້າພຣະອົງນີ້ ພຣະອົງຊົງຮູ້ແຈ້ງແນ່ນອນ
ທັງຢ່າງອື່ນກໍຍັງຊົງຮູ້ດ້ວຍ
ຍ້ອນພຣະອົງຊົງເປັນພຸດທະຢ່າງແທ້ຈິງ
ຍ້ອນພຣະອົງຊົງເປັນພຸດທະນັ້ນແລຈຶ່ງຊົງມີອານຸພາບ
ຮຸ່ງເຮືອງແນວນີ້ ຊົງເຮັດພົມມະໂລກໃຫ້ສະຫວ່າງສະໄຫວຢູ່

**ພະກະພົມຊາດົກທີ ໑໐ ຈົບ**

**ກຸກກຸວັກທີ ໑ ຈົບ**

## ລວມຊາດົກທີ່ມີໃນວັກນີ້

| | |
|---|---|
| ໑. ກຸກກຸຊາດົກ | ໒. ມະໂນຊະຊາດົກ |
| ໓. ສຸຕະນະຊາດົກ | ໔. ມາຕຸໂປສະກະຄິຊະນະຊາດົກ |
| ໕. ທັບພະປຸບຜະຊາດົກ | ໖. ທະສັນນະກະຊາດົກ |
| ໗. ເສນະກະຊາດົກ | ໘. ອັດຖິເສນະຊາດົກ |
| ໙. ກະປິຊາດົກ | ໑໐. ພະກະພົມຊາດົກ |

# ໘. ຄັນທາຣະວັກ

## ໝວດວ່າດ້ວຍຄັນທາຣະດາບົດ

## ໑. ຄັນທາຣະຊາດົກ (໔໐໖)

## ວ່າດ້ວຍຄັນທາຣະດາບົດໂພທິສັດ

(ພຣະໂພທິສັດຕໍ່ວ່າວິເທຫະດາບົດວ່າ)

[໗໖] ທ່ານລະຖິ້ມໝູ່ບ້ານຈຳນວນເຖິງ ໑໖,໐໐໐ ໝູ່ບ້ານ
ແລະເຮືອນຄັງທີ່ບໍລິບູນດ້ວຍຊັບສົມບັດ
ບັດນີ້ ຍັງທຳການສະສົມຢູ່ອີກ

(ວິເທຫະດາບົດແຍ້ງວ່າ)

[໗໗] ທ່ານລະແຄວ້ນຄັນທາຣະເຊິ່ງມີຊັບແລະນ້ຳດື່ມສົມບູນ
ເລີກຈາກການສັ່ງສອນ
ເປັນຫຍັງ ດຽວນີ້ຈຶ່ງຍັງສັ່ງສອນຢູ່ໃນບ່ອນນີ້ອີກນໍ

(ພຣະໂພທິສັດກ່າວວ່າ)

[໗໘] ທ່ານເວເທຫະດາບົດ ຂ້າພະເຈົ້າກ່າວທຳ
ຂ້າພະເຈົ້າບໍ່ພໍໃຈອະທຳເລີຍ
ບາບຍ່ອມບໍ່ແປດເປື້ອນຂ້າພະເຈົ້າຜູ້ກ່າວທຳ

(ວິເທຫະດາບົດກ່າວວ່າ)

[໗໙] ແມ່ນຫາກວາຈາຈະມີປະໂຫຍດຫຼາຍ
ແຕ່ຜູ້ອື່ນໄດ້ຮັບຄວາມຂັດເຄືອງໃຈ
ຍ້ອນເຫດແນວໃດແນວໜຶ່ງ
ວາຈານັ້ນບັນດິດກໍບໍ່ຄວນຈະກ່າວ

(ພຣະໂພທິສັດກ່າວວ່າ)

[໘໐] ບຸກຄົນເມື່ອຖືກຕັກເຕືອນຈະໂກດຫຼືບໍ່ໂກດກໍຕາມ
ຫຼືຈະໂຮ່ຍຄວາມໂກດເໝືອນກັບໂຮ່ຍແກບຖິ້ມກໍຕາມ
ແຕ່ບາບກໍບໍ່ແປດເປື້ອນຂ້າພະເຈົ້າຜູ້ກ່າວທຳ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໗໑] ຫາກຊົນຈຳນວນຫຼາຍບໍ່ມີຄວາມຮູ້ເປັນຂອງຕົນ
ຫຼືບໍ່ໄດ້ສຶກສາວິໄນຢ່າງດີ
ກໍຈະເພິ່ງທ່ຽວໄປເໝືອນຄວາຍຕາບອດທ່ຽວໄປໃນປ່າ

[໗໒] ຍ້ອນບຸກຄົນບາງພວກໃນໂລກນີ້
ໄດ້ສຶກສາດີແລ້ວໃນສຳນັກຂອງອາຈານ
ສະນັ້ນ ຈຶ່ງເປັນຜູ້ມີວິໄນໄດ້ຮັບການແນະນຳແລ້ວ
ມີຈິດຕັ້ງໝັ້ນດີແລ້ວທ່ຽວໄປ

**ຄັນທານະຊາດົກທີ ໑ ຈົບ**

# ໒. ມະຫາກະປິຊາດົກ (໔໐໗)
# ວ່າດ້ວຍພະຍາລິງໂພທິສັດ

(ພຣະຣາຊາຕັດຖາມພະຍາລິງວ່າ)

[໗໓] ພະຍາລິງ ເຈົ້າເຮັດຕົວໃຫ້ເປັນຂົວ
ໃຫ້ລິງເຫຼົ່ານີ້ຂ້າມໄປໂດຍປອດໄພ
ເຈົ້າເປັນອັນໃດກັບລິງເຫຼົ່ານັ້ນ
ລິງເຫຼົ່ານັ້ນເປັນອັນໃດກັບເຈົ້າ

(ພະຍາລິງຂາບທູນວ່າ)

[໗໔] ຂໍເດຊະພຣະອົງຜູ້ຜາບຂ້າເສິກ
ຂ້າພຣະອົງເປັນພະຍາລິງຜູ້ເປັນໃຫຍ່ປົກຄອງຝູງລິງເຫຼົ່ານັ້ນ
ຜູ້ມີທັງຄວາມເສົ້າໂສກແລະຄວາມຢ້ານຕໍ່ພຣະອົງ

[໗໕] ຂ້າພຣະອົງໄດ້ພຸ່ງຕົວເຊິ່ງມີເຄືອຜູກຕິດທີ ໒ ຕີນຫຼັງຢ່າງໝັ້ນຄົງ
ໄປຈາກຕົ້ນໄມ້ນັ້ນປະມານຊົ່ວຮ້ອຍຄັນທະນູທີ່ປົດສາຍແລ້ວ

[໗໖] ຂ້າພຣະອົງນັ້ນພຸ່ງອອກໄປຕາມລົມເຂົ້າຫາຕົ້ນໝາກມ່ວງນີ້
ຄືເມກຖືກລົມພັດຂາດ ເມື່ອໄປບໍ່ເຖິງ
ຈຶ່ງໃຊ້ຂາໜ້າທັງ ໒ ຈັບງ່າໝາກມ່ວງກາງອາກາດນັ້ນ

[໗໗]　ຂ້າພຣະອົງນັ້ນ ຖືກງ່າໄມ້ແລະເຄືອເຂົາຂຶງຢູ່ເໝືອນສາຍພິນ
ພວກລີງໃຊ້ຕີນຢຽບຂ້າມໄປໂດຍປອດໄພ

[໗໘]　ການຜູກດ້ວຍເຄືອເຂົານັ້ນບໍ່ເຮັດໃຫ້ຂ້າພຣະອົງເດືອດຮ້ອນ
ເຖິງຕາຍກໍບໍ່ເດືອດຮ້ອນ ຂໍຂ້າພຣະອົງໄດ້ນຳຄວາມສຸກ
ມາໃຫ້ແກ່ຝູງລີງທີ່ຂ້າພຣະອົງປົກຄອງຢູ່ (ເທົ່ານັ້ນ)

[໗໙]　ຂໍເດຊະພຣະຣາຊາຜູ້ຜາບຂ້າເສິກ
ນີ້ເປັນອຸປະມາສຳລັບພຣະອົງ
ຂໍພຣະອົງຊົງສະດັບຂໍ້ອຸປະມານັ້ນເທີ້ນ
ກໍພຣະຣາຊາມະຫາກະສັດຜູ້ຊົງຮູ້ແຈ້ງ
ຄວນຈະສະແຫວງຫາຄວາມສຸກມາໃຫ້ແກ່ຊົນທັງປວງ
ຄື ທັງຊາວແຄວັນ ພາຫະນະ ພົນນິກາຍ ແລະຊາວບ້ານ

**ມະຫາກະປິຊາດົກທີ ໘ ຈົບ**

## ໙. ກຸມພະກາຣະຊາດົກ (໔໐໘)
## ວ່າດ້ວຍນາຍຊ່າງໝໍ້

(ພຣະປັດເຈກພຸດທະເຈົ້າ ໔ ອົງກ່າວກັບພຣະໂພທິສັດອົງລະຄາຖາວ່າ)

[໘໐]　ອາດຕະມາໄດ້ເຫັນຕົ້ນໝາກມ່ວງກາງປ່າຂຽວຊະອຸ່ມ
ງອກງາມ ແຕກດອກອອກຜົນບານສະພັ່ງ
ອາດຕະມາໄດ້ເຫັນໝາກມ່ວງຕົ້ນນັ້ນຖືກທຳລາຍ ຍ້ອນໝາກເປັນເຫດ
ເມື່ອເຫັນເຊັ່ນນັ້ນຈຶ່ງທ່ຽວພິກຂາຈານ (ອອກບວດ)

[໘໑]　ກຳໄລແກ້ວຄູ່ໜຶ່ງທີ່ນາຍຊ່າງຜູ້ຊານສະຫຼາດເຈຍລະໄນແລ້ວ
ເປັນຂອງກຽ້ງເກົາ ທີ່ສະຕີສວມໃສ່ຍ່ອມບໍ່ເກີດສຽງດັງ
ແຕ່ຍ່ອນສວມໃສ່ວົງທີ ໒ ເຂົ້າຈຶ່ງໄດ້ມີສຽງດັງ
ອາດຕະມາເຫັນເຊັ່ນນັ້ນແລ້ວຈຶ່ງທ່ຽວພິກຂາຈານ

[໘໒]　ນົກຈຳນວນຫຼາຍພາກັນຫຸ້ມຈິກຕີ ນົກຕົວໜຶ່ງ
ເຊິ່ງກຳລັງຄາບຕ່ອນຊີ້ນມາຢູ່ຍ້ອນອາຫານເປັນເຫດ
ອາດຕະມາໄດ້ເຫັນເຊັ່ນນັ້ນແລ້ວຈຶ່ງທ່ຽວພິກຂາຈານ

[໗໓] ອາດຕະມາໄດ້ເຫັນງົວຜູ້ມີໜອກສະເນືອນ
ມີສີສັນແລະມີກຳລັງຢູ່ທ່າມກາງຝູງງົວ
ອາດຕະມາໄດ້ເຫັນມັນຊົນງົວຜູ້ຕົວໜຶ່ງຍ້ອນການເປັນເຫດ
ເມື່ອເຫັນເຊັ່ນນັ້ນແລ້ວຈຶ່ງທ່ຽວພິກຂາຈານ

(ພຣະໂພທິສັດກ່າວກັບພັນລະຍາວ່າ)

[໗໔] ພຣະເຈົ້າກະຣັນຖະກະ ຣາຊາແຫ່ງແຄວ້ນກາລິງຄະ
ພຣະເຈົ້ານັກຄະຊິ ຣາຊາແຫ່ງແຄວ້ນຄັນທາຣະ
ພຣະເຈົ້ານິມິຣາດຣາຊາແຫ່ງແຄວ້ນວິເທຫະ
ແລະພຣະເຈົ້າທຸມມຸຂະ ຣາຊາແຫ່ງແຄວ້ນປັນຈາລະ
ຊົງລະຖິ້ມແຄວ້ນເຫຼົ່ານັ້ນແລ້ວ
ໝົດຄວາມກັງວົນ ຊົງບວດແລ້ວ

[໗໕] ແມ່ນພຣະຣາຊາທຸກພຣະອົງສະເໝີດ້ວຍເທບເຈົ້າ
ສະເດັດມາປະຊຸມກັນ ຍ່ອມຮຸ່ງເຮືອງເໝືອນໄຟທີ່ລຸກຮຸ່ງສະຫວ່າງ
ນີ້ນາງຜູ້ມີໂຊກ ເຖິງອ້າຍກໍຈະເປັນເໝືອນພຣະຣາຊາເຫຼົ່ານີ້
ຈັກລະການເຊິ່ງມີປະການຕ່າງ ໆ ແລ້ວທ່ຽວໄປຜູ້ດຽວ

(ພັນລະຍາກ່າວວ່າ)

[໗໖] ເວລານີ້ທີ່ນັ້ນເໝາະທີ່ຈະບວດ ເວລາອື່ນບໍ່ເໝາະ
ພາຍຫຼັງຄົງຈະບໍ່ມີຜູ້ທີ່ຈະພໍ່າສອນຂ້ານ້ອຍ
ທ່ານຜູ້ມີໂຊກ ເຖິງຂ້ານ້ອຍກໍຈັກທ່ຽວໄປຜູ້ດຽວ
ເໝືອນສະກຸນີທີ່ລອດພົ້ນຈາກມືຄົນ

(ພຣະໂພທິສັດກ່າວວ່າ)

[໗໗] ພວກເດັກ ໆ ຮູ້ຈັກຂອງດິບ ຂອງສຸກ ຂອງເຄັມ ແລະຂອງຈືດ
ອາດຕະມາເຫັນເຊັ່ນນັ້ນແລ້ວຈຶ່ງບວດ
ນາງຈົ່ງທ່ຽວພິກຂາຈານໄປເທີ້ນ
ອາດຕະມາກໍຈະທ່ຽວພິກຂາຈານໄປ

**ກຸມພະກາຣະຊາດົກທີ ໑ ຈົບ**

# ໔. ທັນລະທະທຳມະຊາດົກ (໔໐໗)
## ວ່າດ້ວຍພຣະເຈົ້າທັນລະທະທຳ

(ຊ້າງກ່າວກັບພຣະໂພທິສັດວ່າ)

[໙໗] ເຖິງຫາກຂ້າພະເຈົ້າຈະຂົນລູກສອນຜູກຕິດໄວ້ເອິກ
ໄປຜະເຊີນໜ້າກັບສັດຕູໃນສະໜາມຮົບ
ກໍບໍ່ໄດ້ເຮັດໃຫ້ພຣະເຈົ້າທັນລະທະທຳໂຜດປານໄດ້
[໙໘] ໜ້າທີ່ທະຫານອັນຍິ່ງໃຫຍ່ແລະການຮັບໃຊ້ສື່ສານ
ທີ່ຂ້າພະເຈົ້າໄດ້ປະຕິບັດເປັນຢ່າງດີໃນສົງຄາມ
ພຣະຣາຊາບໍ່ໄດ້ຊົງຮູ້ແນ່
[໑໐໐] ຂ້າພະເຈົ້ານັ້ນຄົງຈະຕ້ອງຕາຍຢ່າງຂາດເພື່ອນ
ຂາດທີ່ເພິ່ງອາໄສແນ່ ຈະເຫັນໄດ້
ດັ່ງທີ່ພຣະຣາດຊະທານຂ້າພະເຈົ້າແກ່ນາຍຊ່າງໝໍ້
ໃຫ້ເຮັດໜ້າທີ່ຂົນອຸດຈາຣະ

(ພຣະໂພທິສັດຂາບທູນພຣະຣາຊາວ່າ)

[໑໐໑] ບຸກຄົນບາງຄົນຍັງຫວັງປະໂຫຍດຢູ່ຕາບໃດ
ກໍຍັງຄົບຫາກັນຢູ່ຕາບນັ້ນ
ເມື່ອຂາດປະໂຫຍດ ພວກຄົນໂງ່ກໍປະຖິ້ມເຂົາໄປ
ເໝືອນກະສັດຊົງປະຖິ້ມຊ້າງພັງຊື່ໂອດຖີພະຍາທິ
[໑໐໒] ຜູ້ໃດເຂົາເຮັດຄວາມດີ ເຮັດປະໂຫຍດໃຫ້ກ່ອນ ກໍບໍ່ຮູ້ຈັກຄຸນ
ປະໂຫຍດທັງຫຼາຍທີ່ເຂົາປາຖະໜາກໍຍ່ອມຈິບຫາຍໄປ
[໑໐໓] ຜູ້ໃດເຂົາເຮັດຄວາມດີ ເຮັດປະໂຫຍດໃຫ້ກ່ອນ ກໍຮູ້ຈັກຄຸນຢູ່ສະເໝີ
ປະໂຫຍດທັງຫຼາຍທີ່ເຂົາປາຖະໜາກໍຍ່ອມຈະເລີນຍິ່ງຂຶ້ນ
[໑໐໔] ຍ້ອນເຫດນັ້ນ ຂ້າພຣະອົງຂໍຂາບທູນພຣະອົງ
ຂໍພຣະອົງຈົ່ງຊົງຈະເລີນ
ຕະຫຼອດທັງປະຊາຊົນທີ່ມາປະຊຸມກັນ ໃນບ່ອນນີ້
ຂໍທ່ານທຸກຄົນຈົ່ງເປັນຜູ້ກະຕັນຍູ
ຈົ່ງດຳຣົງຢູ່ໃນສະຫວັນສິ້ນການລະນານ

**ທັນລະທະທຳມະຊາດົກທີ ໔ ຈົບ**

## ៥. ໂສມະທັດຕະຊາດົກ (໔໑໐)
## ວ່າດ້ວຍລູກຊ້າງຊື່ໂສມະທັດ

(ດາບົດຄ່ຳຄວນຫາຊ້າງນ້ອຍວ່າ)

[໑໐໔] ເມື່ອກ່ອນ ໂສມະທັດຊ້າງນ້ອຍມີອັດທະຍາໄສກວ້າງຂວາງ
ມາຕ້ອນຮັບເຮົາແຕ່ໄກໃນປ່າ
ວັນນີ້ຫາຍໄປໃສແລ້ວ ຈຶ່ງບໍ່ເຫັນ

[໑໐໕] ຊ້າງເຊືອກທີ່ນອນຕາຍເໝືອນຍອດເຄືອໄຮຍ້ອຍ
ທີ່ຖືກເດັດຖິ້ມຄືເຈົ້າໂສມະທັດນີ້ເອງ
ເຈົ້າກຸນຊອນລົ້ມລົງນອນທີ່ພື້ນດິນຕາຍສາແລ້ວນໍ

(ທ້າວສັກກະຕັດກັບດາບົດວ່າ)

[໑໐໖] ການທີ່ທ່ານບວດເປັນສະມະນະພົ້ນຈາກການຄອງເຮືອນໄປແລ້ວ
ຍັງມົວເສົ້າໂສກເຖິງຜູ້ທີ່ລ່ວງລັບໄປແລ້ວ ບໍ່ເປັນການດີເລີຍ

(ດາບົດກ່າວກັບທ້າວສັກກະວ່າ)

[໑໐໗] ທ້າວສັກກະ ຍ້ອນການຢູ່ຮ່ວມກັນແລ
ຄວາມຮັກຈຶ່ງເກີດໃນຫົວໃຈຂອງມະນຸດຫຼືຂອງເນື້ອ
ອາດຕະມາຈຶ່ງບໍ່ສາມາດທີ່ຈະບໍ່ເສົ້າໂສກເຖິງລູກເນື້ອນັ້ນໄດ້

(ທ້າວສັກກະຕັດວ່າ)

[໑໐໘] ຊົນເຫຼົ່າໃດຮ້ອງໄຫ້ ຈົ່ມເພີ້ ລຳພັນ
ເຖິງຄົນທີ່ຕາຍແລ້ວແລະຄົນທີ່ຈະຕາຍ
ສັດຕະບຸຣຸດທັງຫຼາຍກ່າວການຮ້ອງໄຫ້ວ່າເປົ່າປະໂຫຍດ
ທ່ານລືສີ ເພາະສະນັ້ນ ທ່ານຢ່າຮ້ອງໄຫ້ໄປເລີຍ

[໑໑໐] ພາມ ສັດທີ່ຕາຍລະໂລກນີ້ໄປແລ້ວ
ຈະເພິ່ງລຸກຂຶ້ນໄດ້ຍ້ອນການຮ້ອງໄຫ້
ເຮົາທຸກຄົນກໍຄົງມາປະຊຸມກັນຮ້ອງໄຫ້ເຖິງໝູ່ຍາດຂອງກັນແລະກັນ

(ດາບົດກ່າວສະດຸດີທ້າວສັກກະວ່າ)

[໑໑໑] ພຣະອົງຊ່ອຍຣະງັບອາດຕະມາຜູ້ຮ້ອນຮົນໃຫ້ສະງົບ
ດັບຄວາມກະວົນກະວາຍທັງໝົດໄດ້
ເໝືອນຄົນເອົານ້ຳຫົດດັບໄຟທີ່ໄໝ້ນ້ຳມັນປຽງ

[໑໑໔] ພຣະອົງໄດ້ບັນເທົາຄວາມເສົ້າໂສກເຖິງບຸດຂອງອາດຕະມາ
ຜູ້ກຳລັງເສົ້າໂສກ ຊື່ວ່າໄດ້ຊ່ອຍຖອນລູກສອນຄືຄວາມເສົ້າໂສກ
ເຊິ່ງສຽບຫົວໃຈຂອງອາດຕະມາຂຶ້ນໄດ້ແລ້ວນໍ

[໑໑໓] ທ້າວວາສະວະ ອາດຕະມາເຊິ່ງພຣະອົງຊ່ອຍຖອນລູກສອນ
ຄືຄວາມເສົ້າໂສກຂຶ້ນໄດ້ແລ້ວເປັນຜູ້ປາສະຈາກຄວາມເສົ້າໂສກ
ບໍ່ມີຄວາມຂຸ່ນມົວ ຈຶ່ງບໍ່ເສົ້າໂສກ ບໍ່ຮ້ອງໄຫ້
ຍ້ອນໄດ້ຟັງຄຳຂອງພຣະອົງ

**ໂສມະທັດຕະຊາດົກທີ ៥ ຈົບ**

## ៦. ສຸສີມະຊາດົກ (៥໑໑)
## ວ່າດ້ວຍພຣະເຈົ້າສຸສີມະອອກບວດ

(ພຣະໂພທິສັດໂອວາດຕົນເອງວ່າ)

[໑໑៥] ເມື່ອກ່ອນຜົມຂອງເຮົາມີສີດຳ ແຕ່ມາຮອດວັນນີ້ປ່ຽນເປັນສີຂາວ
ສຸສີມະ ຈົ່ງປະພຶດທຳເທີ້ນ
ເວລານີ້ເປັນເວລາສົມຄວນທີ່ຈະປະພຶດພົມມະຈັນແລ້ວ

(ພຣະຣາດຊະເທວີທູນພຣະຣາຊາວ່າ)

[໑໑៥] ຂໍເດຊະພຣະອົງຜູ້ສົມມຸດຕິເທບ
ຜົມທາງອກຂອງຂ້ານ້ອຍບໍ່ແມ່ນຂອງພຣະອົງ
ຜົມທາງອກງອກເທິງຫົວຂອງຂ້ານ້ອຍ
ຂ້ານ້ອຍໄດ້ທູນຄຳຕົວະເພາະຫວັງປະໂຫຍດແກ່ຕົນເອງ
ຂໍເດຊະພຣະຣາຊາຜູ້ປະເສີດ
ຂໍພຣະອົງພຣະຣາດຊະທານອະໄພແກ່ຂ້ານ້ອຍຈັກເທື່ອໜຶ່ງເທີ້ນ

[໑໑៦] ຂໍເດຊະພຣະມະຫາຣາດ ພຣະອົງຍັງຊົງໜຸ່ມ ໜ້າທັດສະນາ
ຊົງດຳຣົງຢູ່ໃນປະຖົມໄວ ງາມຄືດັ່ງຍອດໄມ້

ຂໍພຣະອົງຊົງຄອບຄອງຣາດຊະສົມບັດ
ແລະຊົງສົນພຣະຫະໄທຂ້ານ້ອຍ
ຂໍພຣະອົງຢ່າຟ້າວປະພຶດພົມມະຈັນທີ່ໃຫ້ຜົນຕາມການເລີຍ

(ພຣະຣາຊາຕັດກັບພຣະຣາດຊະເທວີວ່າ)

[໑໑໗] ເຮົາເຫັນສາວໄວລຸ້ນ ມີຜິວພັນກົ່ງງເກົາ
ຮ່າງກາຍງົດງາມ ຊວດຊົງເສີດສາຍ
ເຈົ້ານາງມີກິຣິຍາລະມຸນລະໄມ ປຽບດັ່ງເຄືອຢານາງ
ເໝືອນວ່າກຳລັງຍົ່ວຍວນກິເລດການໃຫ້ເກີດຍາມເຂົ້າໃກ້ບຸຣຸດເພດ

[໑໑໘] ຕໍ່ມາເຮົາເຫັນຍິງນັ້ນມີອາຍຸເຖິງ ໘໐ ປີ ຫຼື ໗໐ ປີນັບແຕ່ເກີດ
ຖືໄມ້ເທົ້າຕົວສັ່ນງັນງົກ ມີກາຍຄ່ອມລົງເໝືອນກອນເຮືອນທ່ຽວໄປຢູ່

[໑໑໙] ເຮົານັ້ນ ເມື່ອພິຈາລະນາເຖິງເຫດອັນນັ້ນແລ
ຈຶ່ງນອນຢູ່ທ່າມກາງບ່ອນນອນຄົນດຽວ ແລະພິຈາລະນາເຫັນວ່າ
ເຖິງເຮົາກໍຈະຕ້ອງເປັນແນວນັ້ນ ຈຶ່ງບໍ່ຍິນດີໃນການຄອງເຮືອນ
ເວລານີ້ເປັນເວລາສົມຄວນທີ່ຈະປະພຶດພົມມະຈັນ

[໑໔໐] ຄວາມຍິນດີຂອງຜູ້ຄອງເຮືອນປຽບເໝືອນເຊືອກທີ່ຜູກຍຶດໜ່ຽວໄວ້
ນັກປາດທັງຫຼາຍຕັດເຊືອກນັ້ນແລ້ວ
ບໍ່ມີຄວາມອາໄລ ລະການສຸກໄປ

**ສຸສີມະຊາດົກທີ ໙ ຈົບ**

## ໗. ໂກຕະສິມພະລິຊາດົກ (໔໑໘)
## ວ່າດ້ວຍເທວະດາຜູ້ສະຖິດຢູ່ທີ່ຕົ້ນງີ້ວໃຫຍ່

(ພະຍາຄຸດກ່າວກັບຣຸກຂະເທວະດາວ່າ)

[໑໔໑] ຂ້າພະເຈົ້າຈັບພະຍານາກຕົວຍາວຕັ້ງ ໑,໐໐໐ ວາມາໄວ້
ພະຍານາກແລະຂ້າພະເຈົ້ານັ້ນມີຮ່າງກາຍໃຫຍ່ໂຕ
ທ່ານຍັງຮອງຮັບໄວ້ໄດ້ ບໍ່ສະທົກສະທ້ານ

[໑໔໔] ໂກຕະສິມພະລິເທບພະບຸດ ຍ້ອນເຫດໃດ

ເມື່ອທ່ານຮອງຮັບນາງນົກນ້ອຍຕົວນີ້ເຊິ່ງມີຊີ້ນນ້ອຍກວ່າຂ້າພະເຈົ້າ
ຈຶ່ງມີຄວາມຢ້ານຈົນຕົວສັ່ນ

(ຣຸກຂະເທວະດາກ່າວກັບພະຍາຄຸດວ່າ)

[໑໘໓] ພະຍາຄຸດ ຕົວທ່ານກິນຊີ້ນເປັນອາຫານ
ສ່ວນນົກນີ້ກິນໝາກໄມ້ເປັນອາຫານ
ນົກຕົວນີ້ກິນເມັດໄຮ ເມັດດີປລີ ເມັດໝາກເດື່ອ
ແລະເມັດໂພແລ້ວ ຈັກຖ່າຍຣາດລໍາຕົ້ນຂ້າພະເຈົ້າ

[໑໘໔] ຕົ້ນໄມ້ເຫຼົ່ານັ້ນຈະຈະເລີນງອກງາມຢູ່ລະຫວ່າງງ່າຂອງຂ້າພະເຈົ້າ
ຕົ້ນໄມ້ເຫຼົ່ານັ້ນຈະກຸ້ງວຮັດປົກຄຸມຂ້າພະເຈົ້າ
ຈັກເຮັດໃຫ້ຂ້າພະເຈົ້າບໍ່ເປັນຕົ້ນໄມ້

[໑໘໕] ແມ່ນຕົ້ນໄມ້ເຫຼົ່າອື່ນມີຮາກແລະລໍາຕົ້ນໝັ້ນຄົງ
ທີ່ຖືກນົກຕົວນີ້ນໍາພືດມາທໍາລາຍກໍມີຢູ່

[໑໘໖] ຕົ້ນໄມ້ທັງຫຼາຍທີ່ງອກຂຶ້ນມາ
ຈະເຕີບໂຕເກີນຕົ້ນໄມ້ເຈົ້າປ່າແມ່ນທີ່ມີລໍາຕົ້ນໃຫຍ່ໂຕ
ພະຍາຄຸດ ຍ້ອນເຫດນັ້ນ ຂ້າພະເຈົ້າເມື່ອເຫັນໄພໃນອະນາຄົດ
ຈຶ່ງສະທົກສະທ້ານຢູ່ແນວນີ້

(ພະຍາຄຸດກ່າວວ່າ)

[໑໘໗] ບຸກຄົນເພິ່ງຣະແວງໄພທີ່ຄວນຣະແວງ
ເພິ່ງປ້ອງກັນໄພທີ່ຍັງມາບໍ່ເຖິງ
ຍ້ອນໄພທີ່ຍັງມາບໍ່ເຖິງ
ນັກປາດຈຶ່ງໄດ້ພິຈາລະນາເຫັນໂລກທັງ ໒

**ໂກຕະສິມພະລິຊາດົກທີ ໗ ຈົບ**

## ໘. ທູມະກາຣິຊາດົກ (໔໑໓)
## ວ່າດ້ວຍພາມຜູ້ດັງໄຟຣົມຄວັນ

(ພຣະສາດສະດາຕັດຂະຫຍາຍອາການຖາມຂອງພຣະທະນົນໄຊໃນອະດີດວ່າ)

[໑໘໗] ພຣະເຈົ້າຍຸທິຕະຖິລະຜູ້ຕ້ອງການທຳ
ໄດ້ຕັດຖາມວິທຸຣະບັນດິດວ່າ
ພາມເຈົ້າຮູ້ແດ່ບໍ
ມີໃຜຄົນໜຶ່ງເສົ້າໂສກຫຼາຍ

(ພຣະໂພທິສັດຂາບທູນພຣະຣາຊາວ່າ)

[໑໘໙] ມີພາມວາເສດຖະໂຄດ ບູຊາໄຟຢູ່ໃນປ່າກັບຝູງແບ້
ບໍ່ຂີ້ຄ້ານ ດັງໄຟຣົມຄວັນທັງກາງເວັນແລະກາງຄືນ

[໑໙໐] ດ້ວຍກິ່ນຄວັນໄຟນັ້ນຂອງເຂົາ ພວກລະມັ່ງຖືກຍຸງລົບກວນ
ຈຶ່ງໄດ້ເຂົ້າໄປຢູ່ໃກ້ພາມຜູ້ດັງໄຟຣົມຄວັນຕະຫຼອດລະດູຝົນ

[໑໙໑] ເຂົາພໍໃຈພວກລະມັ່ງ ເລີຍບໍ່ເອົາໃຈໃສ່ພວກແບ້
ມັນຈະມາຫຼືຈະໄປກໍບໍ່ຮັບຮູ້
ແບ້ເຫຼົ່ານັ້ນຂອງເຂົາຈຶ່ງພິນາດໄປ

[໑໙໒] ເມື່ອປ່າຂາດຍຸງໃນລະດູໃບໄມ້ຫຼົ່ນ
ພວກລະມັ່ງກໍພາກັນເຂົ້າໄປສູ່ຮ່ອມພູແລະຕົ້ນນ້ຳລຳທານ

[໑໙໓] ພາມເຫັນພວກລະມັ່ງຈາກໄປແລ້ວ
ແລະພວກແບ້ກໍເຖິງຄວາມພິນາດ ຈຶ່ງຈ່ອຍແຫ້ງ
ມີຜິວພັນໝົ່ນໝອງແລະເປັນໂຣກຜອມເຫຼືອງ

[໑໙໔] ດ້ວຍປະການດັ່ງນີ້ ຜູ້ໃດບໍ່ສົນໃຈຄົນເກົ່າຂອງຕົນ
ຮັກແຕ່ຄົນມາໃໝ່ ຜູ້ນັ້ນກໍຈະໂດດດ່ຽວ
ເສົ້າໂສກຫຼາຍເໝືອນດັ່ງພາມຜູ້ດັງໄຟຣົມຄວັນ

**ທູມະກາຣິຊາດົກທີ ໗ ຈົບ**

## ໙. ຊາຄະຣະຊາດົກ (໔໑໔)
## ວ່າດ້ວຍຜູ້ຫຼັບແລະຕື່ນ

(ຣຸກຂະເທວະດາຖາມພຣະໂພທິສັດວ່າ)

[໑໙໕] ໃນໂລກນີ້ ເມື່ອເຂົາຕື່ນ ໃຜຫຼັບ ເມື່ອເຂົາຫຼັບ ໃຜຕື່ນ

ໃຜຈະເຂົ້າໃຈບັນຫານີ້ຂອງເຮົານໍ
ໃຜຈະຕອບບັນຫານີ້ແກ່ເຮົາໄດ້

(ພຣະໂພທິສັດຕອບວ່າ)

[໑໓໕] ເມື່ອພວກເຂົາຕື່ນຢູ່ ຂ້າພະເຈົ້າຫຼັບ
ເມື່ອພວກເຂົາຫຼັບ ຂ້າພະເຈົ້າຕື່ນຢູ່
ຂ້າພະເຈົ້າເຂົ້າໃຈບັນຫານີ້ ຂ້າພະເຈົ້າຂໍຕອບທ່ານ

(ຣຸກຂະເທວະດາຖາມວ່າ)

[໑໓໖] ເມື່ອພວກເຂົາຕື່ນ ທ່ານຫຼັບແນວໃດ
ເມື່ອພວກເຂົາຫຼັບ ທ່ານຕື່ນແນວໃດ
ທ່ານເຂົ້າໃຈບັນຫານີ້ແນວໃດ
ທ່ານຕອບຂ້າພະເຈົ້າໄດ້ແນວໃດ

(ພຣະໂພທິສັດຕອບວ່າ)

[໑໓໗] ຄົນເຫຼົ່າໃດບໍ່ຮູ້ຈັກທຳວ່າ
ນີ້ເປັນສັນຍະມະ ແລະວ່ານີ້ເປັນທະມະ
ເມື່ອຄົນເຫຼົ່ານັ້ນຫຼັບຢູ່ ຂ້າພະເຈົ້າກໍຕື່ນຢູ່ເທວະດາ

[໑໓໘] ຊົນເຫຼົ່າໃດຄາຍຣາຄະ ໂທສະ ແລະອະວິດຊາໄດ້ແລ້ວ
ເມື່ອຊົນເຫຼົ່ານັ້ນຕື່ນຢູ່ ຂ້າພະເຈົ້າກໍຫຼັບຢູ່ເທວະດາ

[໑໔໐] ເມື່ອທ່ານເຫຼົ່ານັ້ນຕື່ນຢູ່ແນວນີ້ ຂ້າພະເຈົ້າກໍຫຼັບ
ເມື່ອທ່ານເຫຼົ່ານັ້ນຫຼັບແລ້ວແນວນີ້ ຂ້າພະເຈົ້າກໍຕື່ນ
ຂ້າພະເຈົ້າເຂົ້າໃຈບັນຫານີ້ແນວນີ້ ຈຶ່ງຕອບທ່ານແນວນີ້

(ຣຸກຂະເທວະດາກ່າວສະດຸດີພຣະໂພທິສັດວ່າ)

[໑໔໑] ຖືກແລ້ວ ເມື່ອເຂົາຕື່ນທ່ານຫຼັບ ເມື່ອເຂົາຫຼັບທ່ານຕື່ນ
ທ່ານເຂົ້າໃຈບັນຫານີ້ຖືກຕ້ອງແລ້ວ ຈຶ່ງຕອບເຮົາໄດ້ຖືກຕ້ອງ

**ຊາຄະຣະຊາດົກທີ ໙ ຈົບ**

## ໑໐. ກຸມມາສະປິນດິຊາດົກ (໔໑໕)
## ວ່າດ້ວຍອານິສົງຖວາຍເຂົ້າໜົມກຸມມາດ

(ພຣະຣາຊາຊົງອຸທານບົດເພງທ່າມກາງພະສົກນິກາອນວ່າ)

[໑໔໘] ໄດ້ຍິນວ່າ ການບໍາຣຸງພຣະພຸດທະເຈົ້າທັງຫຼາຍ
ຜູ້ເຫັນທໍາອັນບໍ່ຕໍ່າຊາມ
ມີຜະລານິສົງບໍ່ໜ້ອຍເລີຍ
ເຊີນເບິ່ງຜະລານິສົງແຫ່ງກ້ອນເຂົ້າໜົມກຸມມາດທັງແຫ້ງທັງຈືດ

[໑໔໙] ເບິ່ງເທີ້ນ ຊ້າງ ງົວ ມ້າ ຈໍານວນຫຼາຍເຫຼົ່ານີ້
ລວມທັງຊັບ ທັນຍະຊາດ ພື້ນປະຖະພີທັງໝົດ
ທັງເຫຼົ່ານາຣີຜູ້ມີຮູບງາມຫຼຽບດ້ວຍນາງອັບປະສອນເຫຼົ່ານີ້
ເປັນຜະລານິສົງຂອງກ້ອນເຂົ້າໜົມກຸມມາດ

(ພຣະຣາດຊະເທວີຂາບທູນພຣະຣາຊາວ່າ)

[໑໘໔] ຂໍເດຊະພຣະອົງຜູ້ອົງອາດຄືດັ່ງພະຍາກຸນຊອນ
ຜູ້ເປັນໃຫຍ່ໃນກຸສົນທໍາ
ພຣະອົງຕັດພຣະຄາຖາຢູ່ເລື້ອຍ ໆ
ຂໍເດຊະພຣະອົງຜູ້ຜະດຸງແຄວ້ນໃຫ້ຈະເລີນ
ຂ້ານ້ອຍຂໍທູນຖາມພຣະອົງ
ຂໍພຣະອົງຜູ້ມີພຣະທະໄທເບີກບານຢ່າງຍິ່ງຕັດບອກເທີ້ນ

(ພຣະຣາຊາຕັດກັບພຣະຣາດຊະເທວີວ່າ)

[໑໘໕] ເຮົາໄດ້ເກີດໃນຕະກູນໜຶ່ງໃນເມືອງນີ້ເອງ
ເປັນຄົນຮັບຈ້າງ ເຮັດວຽກໃຫ້ຄົນອື່ນ ເປັນຜູ້ສັງລວມດ້ວຍສິນ

[໑໘໖] ເຮົາອອກໄປເຮັດວຽກໄດ້ເຫັນສະມະນະ ໔ ອົງ
ສົມບູນດ້ວຍອາຈາຣະແລະສິນ ເຢືອກເຢັນ ບໍ່ມີອາສະວະ

[໑໘໗] ເຮົາຍັງຈິດໃຫ້ເຫຼື້ອມໃສໃນສະມະນະເຫຼົ່ານັ້ນ
ນິມົນໃຫ້ນັ່ງເທິງເຄື່ອງລາດທີ່ເຮັດດ້ວຍໃບໄມ້ ເຫຼື້ອມໃສແລ້ວ
ໄດ້ຖວາຍເຂົ້າໜົມກຸມມາດແດ່ພຸດທະເຈົ້າທັງຫຼາຍດ້ວຍມືທັງ ໔ ຂອງຕົນ

[໑໔໗] ກຸສົນກຳນັ້ນໄດ້ມີຜົນແກ່ເຮົາແນວນີ້
ເຮົາໄດ້ສະເຫວີຍຣາດຊະສົມບັດນີ້
ຄືແຜ່ນດິນທີ່ປະເສີດມັ່ງຄັ່ງສົມບູນ

(ພຣະຣາດຊະເທວີຕັດສະດຸດີພຣະຣາຊາວ່າ)

[໑໔໘] ພຣະອົງເມື່ອພຣະຣາດຊະທານໃຫ້ ກໍຈົ່ງສະເຫວີຍເທີ້ນ
ຢ່າໄດ້ຊົງຜະໝາດ
ຂໍເດຊະພຣະອົງຜູ້ເປັນໃຫຍ່ໃນກຸສົນທຳ
ຂໍພຣະອົງຊົງປະກາດທຳມະຈັກໃຫ້ເປັນໄປ
ຂໍເດຊະພຣະຣາຊາຜູ້ເປັນໃຫຍ່ໃນກຸສົນທຳ
ຂໍພຣະອົງຢ່າປະພຶດອະທຳ ຈົ່ງຊົງຮັກສາທຳເທີ້ນ

(ພຣະຣາຊາຕັດກັບພຣະຣາດຊະເທວີວ່າ)

[໑໕໐] ພຣະທິດາຂອງພຣະເຈົ້າໂກສົນຜູ້ງົດງາມ
ເຮົານັ້ນໄດ້ປະພຶດຕາມທາງທີ່ພຣະອະຣິຍະ
ໄດ້ປະພຶດມາແລ້ວນັ້ນຢ່າງສະໝ່ຳສະເໝີ
ຍ້ອນພຣະອະຣະຫັນທັງຫຼາຍເປັນທີ່ພໍໃຈຂອງເຮົາ
ເຮົາຕ້ອງການພົບທ່ານ

[໑໕໑] ນີ້ພຣະຣາດຊະທິດາຜູ້ແສນດີຂອງພຣະເຈົ້າໂກສົນ
ພຣະນາງງົດງາມທ່າມກາງໝູ່ນາຣີ ເໝືອນເທບອັບປະສອນ
ພຣະນາງໄດ້ທຳກຳດີອັນໃດໄວ້
ຍ້ອນເຫດໃດນໍ ພຣະນາງຈຶ່ງມີພຣະສະຫວີວັນງົດງາມຫຼາຍແທ້

(ພຣະຣາດຊະເທວີທູນວ່າ)

[໑໕໔] ຂໍເດຊະຈອມກະສັດ ຂ້ານ້ອຍໄດ້ເກີດເປັນທາສີ
ຮັບໃຊ້ຜູ້ອື່ນແຫ່ງຕະກູນເສດຖີອຳພັດຖະໂຄດ
ສັງລວມແລ້ວ ລ້ຽງຊີບໂດຍຊອບທຳ ມີສີນ ບໍ່ຫຼຽວເບິ່ງຄວາມຊົ່ວ

[໑໕໕] ໃນການຄັ້ງນັ້ນ ຂ້ານ້ອຍໄດ້ຖວາຍເຂົ້າ
ທີ່ຕັກມາເພື່ອຕົນແກ່ພິກຂຸຜູ້ທ່ຽວບິນທະບາດ
ຂ້ານ້ອຍເອງພໍໃຈ ດີໃຈ

ກໍາຂອງຂ້ານ້ອຍນັ້ນມີຜົນແນວນີ້

**ກຸມມາສະປິນດິຊາດົກທີ ໑໐ ຈົບ**

## ໑໑. ປະຣັນຕະປະຊາດົກ (໔໑໖)

## ວ່າດ້ວຍປະຣັນຕະປະມະຫາດນ້ອຍ

(ມະຫາດນ້ອຍຊື່ປະຣັນຕະປະຂາບທູນພຣະຣາດຊະເທວີວ່າ)

[໑໕໔] ບາບຄົງຈະມາເຖິງຂ້າພຣະອົງ ໄພຄົງຈະມາເຖິງຂ້າພຣະອົງ
ເພາະໃນເວລານັ້ນ ຄົນຫຼືສັດໄດ້ເຮັດງ່າໄມ້ໃຫ້ໄຫວ

(ປຸໂຣຫິດຄິດເຖິງພັນລະຍາ ຈຶ່ງຈົ່ມເພີ້ວ່າ)

[໑໕໕] ຄວາມກະສັນຂອງຂ້າພະເຈົ້າກັບຍິງຜູ້ຢ້ານກົວເຊິ່ງຢູ່ບໍ່ໄກ
ຈັກເຮັດໃຫ້ຂ້າພະເຈົ້າຜອມເຫຼືອງແນ່
ເໝືອນງ່າໄມ້ເຮັດໃຫ້ເຈົ້າປະຣັນຕະປະຜອມເຫຼືອງ
[໑໕໖] ແມ່ການດາຜູ້ມີຄວາມງາມຫາທີ່ຕິບໍ່ໄດ້
ຢູ່ໃນບ້ານກໍຍັງຈັກເຮັດໃຫ້ຂ້າພະເຈົ້າເສົ້າໂສກ
ຈັກທໍາໃຫ້ຂ້າພະເຈົ້າຜອມເຫຼືອງ
ເໝືອນງ່າໄມ້ເຮັດໃຫ້ເຈົ້າປະຣັນຕະປະຜອມເຫຼືອງ
[໑໕໗] ຫາງຕາທີ່ຢາດຍ້ອຍເຊິ່ງເຈົ້ານາງຫຼຽວມາ
ການຍິ້ມແລະການເຈຣະຈາ
ຈັກເຮັດໃຫ້ຂ້າພະເຈົ້າຜອມເຫຼືອງ
ເໝືອນງ່າໄມ້ເຮັດໃຫ້ເຈົ້າປະຣັນຕະປະຜອມເຫຼືອງ

(ປະຣັນຕະປະກ່າວກັບພຣະກຸມານວ່າ)

[໑໕໘] ສຽງນັ້ນໄດ້ມາແນ່ແລ້ວ
ສຽງນັ້ນໄດ້ບອກແກ່ທ່ານແນ່ແລ້ວ
ຜູ້ທີ່ສັ່ນງ່າໄມ້ນັ້ນໄດ້ບອກເຫດນັ້ນແນ່
[໑໕໙] ສິ່ງທີ່ເຮົາຜູ້ເປັນຄົນໂງ່ຄິດແລ້ວວ່າ
ກໍໃນເວລານັ້ນ ຄົນຫຼືສັດໄດ້ເຮັດງ່າໄມ້ໃຫ້ໄຫວ
ສິ່ງນີ້ແລໄດ້ມາເຖິງແລ້ວ

(ພຣະກຸມານຕັດວ່າ)

[໑໓໐] ເຈົ້າໄດ້ສຳນຶກແລ້ວແມ່ນບໍ່ວ່າ ຕາມທີ່ເຈົ້າໄດ້ຂ້າພໍ່ຂອງເຮົາ
ເອົາງ່າໄມ້ປິດໄວ້ຕ້ອງຣະແວງຢູ່ວ່າ ໄພຈັກມາເຖິງຕົວເຮົາ

**ປະຣັນຕະປະຊາດົກທີ ໑໑ ຈົບ**

**ຄັນທາຣະວັກທີ ໔ ຈົບ**

# ລວມຊາດົກທີ່ມີໃນວັກນີ້ ຄື

໑. ຄັນທາຣະຊາດົກ
໒. ກຸມພະກາຣະຊາດົກ
໓. ໂສມະທັດຕະຊາດົກ
໗. ໂກຕະສິມພະລິຊາດົກ
໙. ຊາຄະຣະຊາດົກ
໑໑. ປະຣັນຕະປະຊາດົກ
໔. ມະຫາກະປິຊາດົກ
໕. ທັບລະທະທຳມະຊາດົກ
໖. ສຸສີມະຊາດົກ
໘. ທູມະກາຣີຊາດົກ
໑໐. ກຸມມາສະປິນດິຊາດົກ

# ລວມວັກທີ່ມີໃນນິບາດນີ້ ຄື

໑. ກຸກກຸວັກ
໔. ຄັນທາຣະວັກ

**ສັດຕະກະນິບາດ ຈົບ**

# ໗. ອັດຖະກະນິບາດ

## ກັດຈານິວັກ

**ໝວດວ່າດ້ວຍນາງກັດຈານີ**

## ໑. ກັດຈານິຊາດົກ (໔໑໗)

**ວ່າດ້ວຍນາງກັດຈານີ**

(ທ້າວສັກກະຕັດຖາມນາງກັດຈານີວ່າ)

[໑] ແມ່ກັດຈານີ ເຈົ້ານຸ່ງຫົ່ມຜ້າຂາວສະອາດ ມີຜົມປຽກຊຸ່ມ
ຍົກໝໍ້ຂຶ້ນຕັ້ງເທິງເຕົາ ຊາວເຂົ້າສານແລະງາປົ່ນ
ເຂົ້າສຸກໃສ່ງາຈັກມີໄວ້ເພື່ອເຫດອັນໃດ

(ນາງກັດຈານີຕອບວ່າ)

[໒] ພາມ ເຂົ້າສຸກໃສ່ງາທີ່ສຸກດີແລ້ວ
ຈັກມີໄວ້ເພື່ອເປັນອາຫານສຳລັບຕົນເອງຫາບໍ່ໄດ້ເລີຍ
ທຳມະໄດ້ຕາຍແລ້ວ
ວັນນີ້ ຂ້າພະເຈົ້າຈັກທຳບຸນອຸທິດໃຫ້ທຳມະກາງປ່າຊ້າ

(ທ້າວສັກກະຕັດວ່າ)

[໓] ແມ່ກັດຈານີ ເຈົ້າຈົ່ງພິຈາຣະນາແລ້ວຈຶ່ງເຮັດ
ໃຜບອກເຈົ້າວ່າ ທຳມະໄດ້ຕາຍແລ້ວ
ທ້າວສະຫັດສະໄນຜູ້ມີອານຸພາບລົ້ນບອກໄວ້ວ່າ
ທຳມະອັນປະເສີດຍ່ອມບໍ່ຕາຍໃນການໃດ ໆ

(ນາງກັດຈານີກ່າວວ່າ)

[໔] ພາມ ຂ້າພະເຈົ້າໝັ້ນໃຈໃນຂໍ້ນີ້ວ່າ
ທຳມະໄດ້ຕາຍແລ້ວ ຂ້າພະເຈົ້າບໍ່ມີຄວາມສົງໄສ
ຍ້ອນດ່ຽວນີ້ ຄົນຊົ່ວກັບເປັນຢູ່ສະບາຍ

[໕] ເໝືອນຢ່າງລູກສະໃພ້ຂອງຂ້າພະເຈົ້າເປັນໝັນ
ນາງທຸບຕີ ຂັບໄລ່ຂ້າພະເຈົ້າແລ້ວອອກລູກ
ດຽວນີ້ນາງເປັນໃຫຍ່ໃນຕະກູນທັງໝົດ
ສ່ວນຂ້າພະເຈົ້າກັບຖືກປະຖິ້ມຢູ່ຄົນດຽວ

(ທ້າວສັກກະຕັດວ່າ)

[໖] ເຮົາຍັງມີຊີວິດຢູ່ ຍັງບໍ່ຕາຍ
ເຮົາມາບ່ອນນີ້ເພື່ອປະໂຫຍດແກ່ເຈົ້າໂດຍສະເພາະ
ລູກສະໃພ້ຄົນໃດທຸບຕີຂັບໄລ່ເຈົ້າແລ້ວອອກລູກ
ເຮົາຈະເຮັດນາງພ້ອມກັບລູກໃຫ້ເປັນເຖົ່າທຸລີສາ

(ນາງກັດຈານີກ່າວວ່າ)

[໗] ຂ້າແດ່ເທວະຣາດຫາກພຣະອົງຊົງພໍພຣະທະໄທສະເດັດມາໃນບ່ອນນີ້
ເພື່ອປະໂຫຍດແກ່ຂ້ານ້ອຍໂດຍອາການແນວນີ້
ຂໍຂ້ານ້ອຍ ລູກຊາຍ ລູກສະໃພ້ ແລະຫຼານ
ຈົ່ງຢູ່ຮ່ວມເຮືອນກັນດ້ວຍຄວາມສະບາຍໃຈດີກວ່າ

(ທ້າວສັກກະຕັດວ່າ)

[໘] ແມ່ກາຕິຍານີ ຫາກເຈົ້າພໍໃຈແນວນັ້ນ
ແມ່ນຈະຖືກທຸບຕີຂັບໄລ່ກໍຢ່າລະທຳ
ຂໍໃຫ້ເຈົ້າ ລູກຊາຍ ລູກສະໃພ້ ແລະຫຼານ
ຈົ່ງຢູ່ຮ່ວມເຮືອນກັນດ້ວຍຄວາມສະບາຍໃຈເທີ້ນ

[໙] ນາງກາຕິຍານີນັ້ນກັບລູກສະໃພ້ໄດ້ມີໃຈບັນເທີງຢູ່ຮ່ວມກັນ
ລູກຊາຍແລະຫຼານກໍໄດ້ຊ່ອຍກັນປະຕິບັດບຳຣຸງ
ຍ້ອນທ້າວສັກກະຜູ້ເປັນຈອມເທບໄດ້ຊົງອະນຸເຄາະ

**ກັດຈານີຊາດົກທີ ໑ ຈົບ**

# ໘. ອັດຖະສັດທະຊາດົກ (໔໑໗)
## ວ່າດ້ວຍສຽງຂອງບຸກຄົນທັງ ໗

(ພຣະດາບົດຂາບທູນຊີ້ແຈ່ງສຽງທັງ ໗ ຄືສຽງນົກຍາງວ່າ)

[໑໐] ເມື່ອກ່ອນລຸ່ມເລິກ ມີປາຫຼາຍ ມີນໍ້າຫຼາຍ
ເປັນບ່ອນຢູ່ອາໄສຂອງພະຍານົກຍາງ ເຊິ່ງເປັນບ່ອນຢູ່ແຫ່ງບິດາຂອງເຮົາ
ທຸກວັນນີ້ ພວກເຮົາມີຊີວິດຢູ່ໄດ້ດ້ວຍກົບ ຈຶ່ງລະຖິ້ມນໍ້າໄປບໍ່ໄດ້

(ສຽງກາວ່າ)

[໑໑] ໃຜນໍຈະທຳລາຍໃນຕາດວງທີ ໘
ຂອງຄວານຊ້າງຊື່ພັນທຸຣະຜູ້ບໍ່ມີສິນ
ໃຜນໍຈັກຊ່ອຍລູກ ໆ ຂອງເຮົາ ຮັງຂອງເຮົາ ແລະຕົວເຮົາໃຫ້ປອດໄພ

(ສຽງແມງພູ່ວ່າ)

[໑໒] ເນື້ອໄມ້ເທົ່າທີ່ມີຢູ່ຖືກເຈາະໄປໝົດແລ້ວ
ຂໍຖວາຍພຣະພອນມະຫາບໍພິດ ແມງພູ່ໝົດອາຫານບໍ່ຍິນດີໃນແກ່ນ

(ສຽງນົກກາເວົ້າ)

[໑໓] ເຮົານັ້ນຄົງຈັກພົ້ນຈາກພຣະຣາດຊະນິເວດໄປຈາກບ່ອນນີ້ແລ້ວ
ເຮັດຕົນໃຫ້ຍິນດີ ອາໄສຢູ່ຕາມຕົ້ນໄມ້ງ່າໄມ້ດີກວ່າ

(ສຽງເນື້ອວ່າ)

[໑໔] ເຮົານັ້ນຄົງຈັກພົ້ນຈາກພຣະຣາດຊະນິເວດໄປຈາກບ່ອນນີ້ແລ້ວ
ຍ່າງນໍາໜ້າຝູງ ດື່ມນໍ້າທີ່ດີ

(ສຽງລີງວ່າ)

[໑໕] ນາຍພານຊື່ພະນະຕະຊາວແຄວ້ນພາຫິກະໄດ້ນຳເຮົາ
ຜູ້ມົວເມົາດ້ວຍກາມ ກຳໜັດມົກມຸ່ນຢູ່ໃນກາມນັ້ນມາ
ຂໍຄວາມຈະເລີນຈົ່ງມີແກ່ທ່ານ

(ສຽງກິນນະຣີວ່າ)

[໑໖] ນາງກິນນະຣີໄດ້ກ່າວກັບເຮົາຢູ່
ຈອມພູແຫຼມໃນເວລາມືດມິດ
ດ້ວຍຄຳເວົ້າອັນອ່ອນຫວານວ່າ
ໂຜດຣະວັງຕີນ
ຢ່າຢຽບພາດໄປຖືກແງ່ຫີນ

(ສຽງພຣະປັດເຈກພຸດທະເຈົ້າວ່າ)

[໑໗] ເຮົາໄດ້ເຫັນພຣະນິບພານອັນເປັນບ່ອນສິ້ນສຸດຊາດ
ຈັກບໍ່ກັບມານອນໃນທ້ອງອີກຢ່າງບໍ່ຕ້ອງສົງໄສ
ຊາດນີ້ເປັນຊາດສຸດທ້າຍ ການນອນໃນທ້ອງກໍເປັນຄັ້ງສຸດທ້າຍ
ສັງສາຣະວັດເພື່ອພົບຕໍ່ໄປຂອງເຮົາສິ້ນສຸດແລ້ວ

**ອັດຖະສັດທະຊາດົກທີ ໘ ຈົບ**

## ໙. ສຸລະສາຊາດົກ (໔໑໙)
## ວ່າດ້ວຍນາງສຸລະສາຍິງງາມເມືອງ

(ນາງສຸລະສາກ່າວກັບສາມີວ່າ)

[໑໘] ນີ້ສາຍສ້ອຍຄຳ ແກ້ວມຸກດາ ແກ້ວໄພທູນ
ເປັນຈຳນວນຫຼາຍ ຂໍເຊີນອ້າຍຂົນໄປທັງໝົດ
ຂໍອ້າຍຈົ່ງມີຄວາມຈະເລີນ ແລະຈົ່ງປະກາດຂ້ານ້ອຍວ່າເປັນນາງທາສີ

(ສາມີກ່າວວ່າ)

[໑໙] ແມ່ໂສມງາມ ທ່ານຈົ່ງປົດອອກມາເທີ້ນ
ຢ່າຄ່ຳຄວນໄປເລີຍ
ເຮົາຈະຂໍບໍ່ຮັບຮູ້ອັນໃດ
ອ້າຍຈະຂ້າເຈົ້າແລ້ວຈຶ່ງນຳຊັບໄປດີກວ່າ

(ນາງສຸລະສາກ່າວວ່າ)

[໒໐] ຕັ້ງແຕ່ຂ້ານ້ອຍຮູ້ດຽງສາ ຂ້ານ້ອຍຈຳຕົວເອງໄດ້ວ່າ

ຍັງບໍ່ເຄີຍຮູ້ຈັກຮັກຊາຍອື່ນຍິ່ງກວ່າອ້າຍເລີຍ

[໔໑] ມານີ້ເທີ້ນ ຂ້ານ້ອຍຈັກສວມກອດອ້າຍ
ແລະຈັກທໍາປະທັກຂິນ
ເພາະຕັ້ງແຕ່ນີ້ຕໍ່ໄປ ຂ້ານ້ອຍແລະອ້າຍຈະບໍ່ພົບກັນອີກ

(ເທວະດາຜູ້ສະຖິດຢູ່ທີ່ ຈອມພູກ່າວວ່າ)

[໔໒] ບໍ່ແມ່ນວ່າຊາຍຈະເປັນບັນດິດໃນທີ່ທຸກສະຖານໄດ້
ແມ່ນຍິງມີປັນຍາເຫັນປະຈັກໃນເລື້ອງນັ້ນ ໆ ກໍເປັນບັນດິດໄດ້

[໔໓] ບໍ່ແມ່ນວ່າຊາຍຈະເປັນບັນດິດໃນທີ່ທຸກສະຖານໄດ້
ແມ່ນຍິງມີປັນຍາຄິດອຸບາຍໄດ້ທັນກໍເປັນບັນດິດໄດ້

[໔໔] ນາງສຸລະສາຜະເຊີນໜ້າໂຈນ ຄິດອຸບາຍໄດ້ຢ່າງວ່ອງໄວ
ໄດ້ຂ້າໂຈນເໝືອນນາຍພານເນື້ອຜູ້ສະຫຼາດ
ເມື່ອທະນູງ້າງລູກສອນໄວ້ພ້ອມຍ່ອມຂ້າເນື້ອໄດ້ທັນທີ

[໔໕] ອັນໜຶ່ງ ຜູ້ໃດບໍ່ຮູ້ເທົ່າທັນເຫດທີ່ເກີດຂຶ້ນໂດຍໃນນີ້
ຜູ້ນັ້ນເປັນຄົນມີປັນຍາໜ້ອຍ
ຍ່ອມຖືກຂ້າເໝືອນໂຈນທີ່ຖືກຂ້າຖິ້ມຢູ່ເຫວເລິກ

[໔໖] ສ່ວນຜູ້ໃດຮູ້ເທົ່າທັນເຫດທີ່ເກີດຂຶ້ນໂດຍໄນນີ້
ຜູ້ນັ້ນຍ່ອມພົ້ນຈາກຄວາມຕາຍອັນເກີດຈາກສັດຕູ
ເໝືອນນາງສຸລະສາພົ້ນຈາກໂຈນຜົວຕົວເອງ

**ສຸລະສາຊາດົກທີ ໓ ຈົບ**

## ໔. ສຸມັງຄະລະຊາດົກ (໔໒໐)
## ວ່າດ້ວຍນາຍສຸມັງຄະລະ

(ພຣະຣາຊາຕັດກັບອໍາມາດວ່າ)

[໔໗] ຜູ້ເປັນໃຫຍ່ຮູ້ຕົວວ່າເຮົາກໍາລັງໂກດຢູ່ກໍບໍ່ຄວນລົງໂທດໃຜ
ຍ້ອນຜູ້ລົງໂທດອັນບໍ່ເໝາະສົມແກ່ຕົນໂດຍຂາດເຫດຜົນແລ້ວ
ຈະເພິ່ງກໍ່ທຸກໃຫ້ເກີດຂຶ້ນແກ່ບຸກຄົນອື່ນຫຼາຍ

[໔໗]　　ເມື່ອໃດຜູ້ເປັນໃຫຍ່ຮູ້ສຶກວ່າຕົນມີຈິດຜ່ອງໃສ
ເພິ່ງພິຈາລະນາຄະດີທີ່ຄົນອື່ນເຮັດຜິດ
ເມື່ອພິຈາລະນາດ້ວຍຕົນເອງວ່າ ຄະດີເປັນແນວນີ້ ໆ
ເມື່ອນັ້ນເພິ່ງລົງໂທດຕາມຄວາມເໝາະສົມແກ່ເຂົາ

[໔໙]　　ສ່ວນຜູ້ໃດບໍ່ລຳອຽງ ພິຈາລະນາຄວາມເໝາະສົມແລະບໍ່ເໝາະສົມ
ຜູ້ນັ້ນຊື່ວ່າບໍ່ບຽດບຽນຜູ້ອື່ນແລະຕົນເອງ
ຜູ້ເປັນໃຫຍ່ຄົນໃດໃນໂລກນີ້ລົງໂທດຕາມສົມຄວນ
ຜູ້ນັ້ນຍ່ອມມີຄຸນງາມຄວາມດີຄຸ້ມຄອງ ບໍ່ເສື່ອມຈາກສິຣິ

[໕໐]　　ກະສັດເຫຼົ່າໃດຊົງລຳອຽງ ບໍ່ຊົງພິຈາລະນາກ່ອນທຳ
ຊົງຮີບລົງພຣະອາດຍາ
ກະສັດເຫຼົ່ານັ້ນມີໂທດອັນໜ້າຕິຕຽນ
ສະຫວັນນະຄົດພົ້ນຈາກໂລກນີ້ໄປແລ້ວຍ່ອມໄປສູ່ທຸກຄະຕິ

[໕໑]　　ກະສັດເຫຼົ່າໃດຊົງຍິນດີໃນທຳທີ່ອະຣິຍະຊົນປະກາດໄວ້ແລ້ວ
ກະສັດເຫຼົ່ານັ້ນນັບວ່າຊົງປະເສີດ
ດ້ວຍກາຍຍະກຳ ວະຈີກຳ ແລະມະໂນກຳ
ກະສັດເຫຼົ່ານັ້ນຊົງດຳຣົງໝັ້ນຢູ່ໃນທຳ
ຄື ຂັນຕິ ໂສຣັດຈະ ແລະສະມາທິ
ຊົງໄປສູ່ໂລກທັງ ໒ ໂດຍວິທີເຊັ່ນນັ້ນ

[໕໒]　　ເຮົາເປັນພຣະຣາຊາຜູ້ເປັນໃຫຍ່ກວ່າຊາຍແລະຍິງ
ເຖິງແມ່ນເຮົາຈະໂກດກໍຈະຫັກຫ້າມຄວາມໂກດໄດ້
ດຳຣົງຕົນໄວ້ແນວນັ້ນຕໍ່ປະຊາຊົນ
ຈະອະນຸເຄາະລົງອາດຍາໂດຍທຳ

(ນາຍສຸມັງຄະລະກ່າວສະດຸດີພຣະຣາຊາວ່າ)

[໕໓]　　ຂໍເດຊະພຣະບໍຣົມກະສັດຜູ້ເປັນໃຫຍ່ແຫ່ງໝູ່ຊົນ
ຂໍພຣະສິຣິສົມບັດຢ່າໄດ້ລະພຣະອົງໃນການໃດ ໆ ເລີຍ
ຂໍພຣະອົງຢ່າຊົງໂກດ ມີພຣະຣາດຊະຫະໄທຜ່ອງໃສຢູ່ເປັນນິດ
ປາສະຈາກຄວາມທຸກ ຮັກສາພຣະອົງຢູ່ຕະຫຼອດ ໑໐໐ ປີເທີ້ນ

[໓໔] ຂໍເດຊະພຣະບໍຣົມກະສັດ
ຂໍພຣະອົງຈົ່ງຊົງປະກອບດ້ວຍຄຸນນະທຳເຫຼົ່ານີ້ ຄື
ຊົງມີພຣະອະຣິຍະວັດອັນໝັ້ນຄົງ ຊົງຮັບອະນຸສາສະນີໂດຍງ່າຍ
ບໍ່ຊົງໂກດ ຊົງພຣະສຳຣານ
ປົກຄອງແຜ່ນດິນໂດຍປາສະຈາກການບຽດບຽນ
ອັນໜຶ່ງ ພຣະອົງແມ່ນສະເດັດພົ້ນຈາກໂລກນີ້ໄປແລ້ວ
ຂໍຈົ່ງສະເດັດສູ່ສຸກຄະຕິເທີ້ນ

[໓໕] ພຣະທຳມິກະຣາຊາທິຣາດຊະເມື່ອຊົງປົກຄອງໂດຍກຸດສະໂລບາຍ
ອັນຊອບທຳ ດ້ວຍເຫດທີ່ເໝາະສົມ ດ້ວຍຄຳອັນເປັນສຸພາສິດ
ເພິ່ງເຮັດມະຫາຊົນຜູ້ມີຄວາມກະວົນກະວາຍໃຫ້ເຢັນໃຈ
ເໝືອນມະຫາເມກເຮັດໃຫ້ແຜນດິນຊຸ່ມສ່ຳດ້ວຍນ້ຳ

**ສຸມັງຄະລະຊາດົກທີ ໔ ຈົບ**

## ໕. ຄັງຄະມາລະຊາດົກ (໔໘໑)

## ວ່າດ້ວຍພຣະປັດເຈກພຸດທະເຈົ້ານາມວ່າຄັງຄະມາລະ

(ພຣະເຈົ້າອຸໄທຕັດຖາມຊາຍຄົນໜຶ່ງວ່າ)

[໓໖] ແຜ່ນດິນຮ້ອນເໝືອນຖ່ານໄຟ
ຮ້ອນຣະອຸດ້ວຍຊາຍທີ່ຮ້ອນເໝືອນກັບເຖົ້າຖ່ານ
ເຖິງປານນັ້ນເຈົ້າກໍຍັງພາກພຽນຮ້ອງເພງຢູ່
ແດດບໍ່ແຜດເຜົາເຈົ້າບໍ?

[໓໗] ເບື້ອງເທິງດວງອາທິດກໍຮ້ອນ ເບື້ອງລຸ່ມຊາຍກໍຮ້ອນ
ເຖິງປານນັ້ນ ເຈົ້າກໍຍັງພາກພຽນຮ້ອງເພງຢູ່
ແດດບໍ່ແຜດເຜົາເຈົ້າບໍ?

(ຊາຍຄົນນັ້ນຂາບທູນວ່າ)

[໓໘] ແດດບໍ່ໄດ້ແຜດເຜົາຂ້າພຣະອົງແຕ່ຢ່າງໃດ
ແຕ່ແດດຄືກາມທັງຫຼາຍຍ່ອມແຜດເຜົາຂ້າພຣະອົງ
ຂໍເດຊະພຣະມະຫາຣາດເຈົ້າ ເພາະວ່າຄວາມຕ້ອງການມີຫຼາຍຢ່າງ
ຄວາມຕ້ອງການເຫຼົ່ານັ້ນຍ່ອມແຜດເຜົາຂ້າພຣະອົງ ບໍ່ແມ່ນແດດແຕ່ຢ່າງໃດ

(ພຣະເຈົ້າອັດທະມາສິກຊົງເປ່ງອຸທານວ່າ)

[໓໙] ນີ້ກາມ ເຮົາໄດ້ເຫັນຮາກເຫງົ້າຂອງເຈົ້າແລ້ວ
ເຈົ້າເກີດໄດ້ຍ້ອນຄວາມດຳຣິຄິດຮອດ ເຮົາຈະບໍ່ດຳຣິເຖິງເຈົ້າອີກ
ເຈົ້າຈະບໍ່ສາມາດສິງໃຈເຮົານີ້ໄດ້ອີກຕໍ່ໄປ

(ພຣະເຈົ້າອັທຖະມາດກຊົງສະແດງທຳແກ່ພະສິກນິກອນວ່າ)

[໔໐] ກາມແມ່ນພຽງເລັກໜ້ອຍກໍບໍ່ພຽງພໍ ແມ່ນຫຼາຍກໍບໍ່ອີ່ມ
ໂອນໍ ກາມທັງຫຼາຍຄົນພານເພີ້ລຳພັນຮອດ
ກຸນລະບຸດນັກປະຕິບັດເພິ່ງເວັ້ນໄດ້ຂາດ

(ພຣະເຈົ້າອຸໄທຊົງເປ່ງອຸທານວ່າ)

[໔໑] ການທີ່ເຮົາເປັນພຣະອຸໄທຣາຊາໄດ້ບັນລຸເຖິງຄວາມເປັນໃຫຍ່
ນີ້ເປັນຜົນແຫ່ງກຳອັນເລັກໜ້ອຍຂອງເຮົາ
ການທີ່ມານິບລະການຣາຄະບວດນັ້ນຊື່ວ່າໄດ້ລາບດີແລ້ວ

(ພຣະຣາດຊະຊິນນີຂອງພຣະເຈົ້າພົມມະທັດຕັດວ່າ)

[໔໒] ສັດທັງຫຼາຍລະກຳຊົ່ວໄດ້ດ້ວຍຕະບະ
ແຕ່ຈະລະພາວະແຫ່ງຊ່າງຕັດຜົມແລະຊ່າງປັ້ນໝໍ້ດ້ວຍຕະບະໄດ້ບໍ
ຄັງຄະມາລະ ວັນນີ້ເຈົ້າໃຊ້ຕະບະຂົ່ມຂີ່
ຮ້ອງຮຽກພຣະເຈົ້າພົມມະທັດໂດຍພະນາມ
ຈະສົມຄວນແລ້ວບໍ?

(ພຣະເຈົ້າພົມມະທັດຊົງຫ້າມພຣະຣາດຊະຊິນນີວ່າ)

[໔໓] ຂໍເດຊະສະເດັດແມ່ ຈົ່ງທອດພຣະເນດຜົນໃນປັດຈຸບັນເທີ້ນ
ນີ້ເປັນຜົນແຫ່ງຂັນຕິແລະໂສຣັດຈະ
ພວກຂ້ານ້ອຍພ້ອມທັງພຣະຣາດຊະວົງແລະເສນາອຳມາດ
ໄຫວ້ທ່ານຜູ້ທີ່ຊົນທັງປວງໄຫວ້ແລ້ວ

(ພຣະເຈົ້າພົມມະທັດຊົງຊີ້ແຈ່ງແກ່ພະສິກນິກອນວ່າ)

[໔໔] ທ່ານທັງຫຼາຍຢ່າໄດ້ວ່າອັນໃດ ໆ ທ່ານຄັງຄະມານະມຸນີ

ຜູ້ສຶກສາຢູ່ໃນຂໍ້ປະຕິບັດຂອງມຸນີ
ເພາະພຣະຜູ້ເປັນເຈົ້າອົງນີ້ໄດ້ຂ້າມມະຫາສະມຸດຄືສັງສາຣະວັດ
ເຊິ່ງຜູ້ທີ່ຂ້າມໄດ້ແລ້ວປາສະຈາກຄວາມເສົ້າໂສກຫ່ຽວໄປຢູ່ເລີຍ

**ຄັງຄະມານະຊາດົກທີ ໕ ຈົບ**

## ໖. ເຈຕິຍະຣາດຊະຊາດົກ (໔໔໘)
## ວ່າດ້ວຍພຣະເຈົ້າເຈຕິຍະຣາດ

(ດາບົດຖວາຍໂອວາດແດ່ພຣະຣາຊາວ່າ)

[໔໕] ທຳຍ່ອມຂ້າຜູ້ທຳລາຍທຳ
ຍ່ອມບໍ່ຂ້າໃຜ ໆ ທີ່ບໍ່ທຳລາຍທຳ
ຍ້ອນເຫດນັ້ນແລ ບຸກຄົນບໍ່ຄວນທຳລາຍທຳ
ຂໍທຳທີ່ພຣະອົງຊົງທຳລາຍແລ້ວຢ່າໄດ້ຂ້າພຣະອົງເລີຍ

[໔໖] ບຸກຄົນເມື່ອກ່າວຄຳເຫຼາະແຫຼະ ເທວະດາທັງຫຼາຍກໍຫຼີກໜີໄປ
ຜູ້ໃດຖືກຖາມບັນຫາ ທັງທີ່ຮູ້ຢູ່ກໍຕອບເປັນແນວອື່ນໄປ
ຜູ້ນັ້ນປາກຈະເນົ່າກິ່ນຟຸ້ງໄປແລະຈະພາດຕົກຈາກຖານະຂອງຕົນ

[໔໗] ຂໍຖວາຍພຣະພອນພຣະເຈົ້າເຈຕິຍະ
ກໍຖ້າພຣະອົງຕັດວາຈາສັດ ພຣະອົງຈະດຳຣົງຢູ່ຄືເກົ່າ
ຖ້າພຣະອົງຍັງຕັດວາຈາຕົວະຢູ່ ພຣະອົງຈະປະທັບຢູ່ແຜ່ນດິນ

[໔໘] ພຣະຣາຊາພຣະອົງໃດຖືກຖາມບັນຫາ
ທັງທີ່ຊົງຮູ້ຢູ່ກໍຊົງຕອບເປັນແນວອື່ນໄປ
ໃນແຄວ້ນຂອງພຣະຣາຊາພຣະອົງນັ້ນ
ຝົນຍ່ອມຕົກໃນເວລາບໍ່ແມ່ນລະດູການ ຍ່ອມບໍ່ຕົກໃນລະດູການ

[໔໙] ຂໍຖວາຍພຣະພອນພຣະເຈົ້າເຈຕິຍະ
ກໍຖ້າພຣະອົງຕັດວາຈາສັດ ພຣະອົງຈະດຳຣົງຢູ່ຄືເກົ່າ
ຖ້າພຣະອົງຍັງຕັດວາຈາຕົວະຢູ່ ພຣະອົງຈະຖືກທໍຣະນີສູບ

[໕໐] ຂໍຖວາຍພຣະພອນ ພຣະອົງຜູ້ເປັນໃຫຍ່ທົ່ວທຸກທິດ
ຜູ້ໃດຖືກຖາມບັນຫາ ທັງທີ່ຮູ້ຢູ່ກໍຕອບເປັນແນວອື່ນໄປ
ຜູ້ນັ້ນຈະມີຊິວຫາເປັນ ໒ ແສກເໝືອນລີ້ນງູ

[໕໑] ຂໍຖວາຍພຣະພອນພຣະເຈົ້າເຈຕິຍະ
ກໍຖ້າພຣະອົງຕັດວາຈາສັດ ພຣະອົງຈະດຳຣົງຢູ່ຄືເກົ່າ
ຖ້າພຣະອົງຍັງຕັດວາຈາຕົວະຢູ່ ພຣະອົງຈະຖືກທໍຣະນີສູບເລິກລົງໄປ

[໕໒] ຂໍຖວາຍພຣະພອນ ພຣະອົງຜູ້ເປັນໃຫຍ່ທົ່ວທຸກທິດ
ຜູ້ໃດຖືກຖາມບັນຫາ ທັງທີ່ຮູ້ຢູ່ກໍຕອບເປັນແນວອື່ນໄປ
ຜູ້ນັ້ນຈະບໍ່ມີຊີວຫາເໝືອນປາ

[໕໓] ຂໍຖວາຍພຣະພອນພຣະເຈົ້າເຈຕິຍະ
ກໍຖ້າພຣະອົງຕັດວາຈາສັດ ພຣະອົງຈະດຳຣົງຢູ່ຄືເກົ່າ
ແຕ່ຖ້າພຣະອົງຍັງຕັດວາຈາຕົວະຢູ່ ພຣະອົງຈະຖືກທໍຣະນີສູບເລິກລົງໄປ

[໕໔] ຜູ້ໃດຖືກຖາມບັນຫາ ທັງທີ່ຮູ້ຢູ່ກໍຕອບເປັນແນວອື່ນ
ຜູ້ນັ້ນຈະມີແຕ່ລູກຜູ້ຍິງມາເກີດ ບໍ່ມີລູກຜູ້ຊາຍມາເກີດໃນຕະກູນ

[໕໕] ຂໍຖວາຍພຣະພອນພຣະເຈົ້າເຈຕິຍະ
ກໍຖ້າພຣະອົງຕັດວາຈາສັດ ພຣະອົງຈະດຳຣົງຢູ່ຄືເກົ່າ
ແຕ່ຖ້າພຣະອົງຍັງຕັດວາຈາຕົວະຢູ່ ພຣະອົງຈະຖືກທໍຣະນີສູບເລິກລົງໄປ

[໕໖] ຜູ້ໃດຖືກຖາມບັນຫາ ທັງທີ່ຮູ້ຢູ່ກໍຕອບເປັນແນວອື່ນໄປ
ຜູ້ນັ້ນຈະບໍ່ມີບຸດ ທີ່ມີກໍຈະຫຼີກໜີໄປຄົນລະທິດລະທາງ

[໕໗] ຂໍຖວາຍພຣະພອນພຣະເຈົ້າເຈຕິຍະ
ກໍຖ້າພຣະອົງຕັດວາຈາສັດ ພຣະອົງຈະດຳຣົງຢູ່ຄືເກົ່າ
ຖ້າພຣະອົງຍັງຕັດວາຈາຕົວະຢູ່ ພຣະອົງຈະຖືກທໍຣະນີສູບເລິກລົງໄປ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໕໘] ພຣະເຈົ້າເຈຕິຍະພຣະອົງນັ້ນເມື່ອກ່ອນເຫາະເຫີນຍ່າງເທິງອາກາດໄດ້
ຖືກລືສີສາບໃຫ້ເສື່ອມຈາກສະພາວະທຳ
ຖືກທໍຣະນີສູບຈົນຕາຍ

[໕໙] ເພາະສະນັ້ນ ບັນດິດທັງຫຼາຍຈຶ່ງບໍ່ສັນເສີນ
ການລ້ວງອຳນາດຄວາມພໍໃຈ
ບຸກຄົນຜູ້ມີຈິດອັນກິເລດບໍ່ປະທຸດສະຮ້າຍ
ຈະກ່າວແຕ່ຄຳເວົ້າທີ່ປະກອບດ້ວຍສັດຈະທໍ່ນັ້ນ

**ເຈຕິຍະຣາຊະຊາດົກທີ ໘ ຈົບ**

# ໗. ອິນທະຣິຍະຊາດົກ (໔໘໓)
## ວ່າດ້ວຍອຳນາດຂອງອິນຊີ

(ສະຣະພັງຄະດາບົດກ່າວກັບນາຣະທະດາບົດວ່າ)

[໗໐] ນາຣະທະ ຜູ້ໃດຕົກຢູ່ໃນອຳນາດຂອງອິນຊີຍ້ອນຄວາມຕ້ອງການ
ຜູ້ນັ້ນເມື່ອລະໂລກທັງ ໘ ແລ້ວຍ່ອມໄປເກີດໃນອະບາຍ
ແມ່ນມີຊີວິດຢູ່ ຮ່າງກາຍກໍຊູບຊີດ

[໗໑] ຕໍ່ຈາກສຸກກໍເປັນທຸກ ຕໍ່ຈາກທຸກກໍເປັນສຸກ
ທ່ານຈະເປັນຜູ້ໄດ້ຮັບທຸກຫຼາຍກວ່າສຸກ
ດັ່ງນັ້ນ ທ່ານເພິ່ງຫວັງສຸກອັນປະເສີດເທີ້ນ

[໗໘] ຜູ້ໃດໃນຍາມລຳບາກ ທົນຕໍ່ຄວາມລຳບາກໄດ້
ບໍ່ຄຳນຶງເຖິງຄວາມລຳບາກ ຜູ້ນັ້ນເປັນນັກປາດ
ຍ່ອມສະເຫວີຍໂຍຄະສຸກອັນເປັນທີ່ສຸດແຫ່ງຄວາມລຳບາກນັ້ນ

[໗໓] ທ່ານບໍ່ຄວນເຄື່ອນຈາກທຳ
ຍ້ອນຄວາມປາຖະໜາການທັງຫຼາຍ
ອັນເປັນເຫດບໍ່ແມ່ນປະໂຫຍດຈາກປະໂຫຍດຕ່າງ ໆ
ແລະຍ້ອນປະຖິ້ມຊານທີ່ໄດ້ພ່ຳເພັງແລ້ວ

(ກາລະເທວິນດາບົດກ່າວກັບນາຣະທະ ດາບົດ ວ່າ)

[໗໔] ຜູ້ຄອງເຮືອນມີຄວາມຂະຫຍັນ ແບ່ງປັນກັນກິນ ເປັນການດີ
ເມື່ອໄດ້ສິ່ງທີ່ຕ້ອງການກໍບໍ່ລືມຕົວ
ແລະເມື່ອເສື່ອມຈາກສິ່ງທີ່ຕ້ອງການກໍບໍ່ເດືອດຮ້ອນ

(ພຣະສາດສະດາຕັດວ່າ)

[໗໕] ກາລະເທວິນດາບົດຜູ້ສະງົບໄດ້ກ່າວຄວາມເປັນບັນດິດນັ້ນພຽງເທົ່ານີ້ວ່າ
ບໍ່ມີສິ່ງອື່ນໃດທີ່ຈະຊົ່ວໄປກວ່າຜູ້ຕົກຢູ່ໃນອຳນາດ
ແຫ່ງອິນຊີທັງຫຼາຍນີ້ເລີຍ

(ມະນຸດເຜດຂາບທູນພຣະເຈົ້າສິພີວ່າ)

[໖໖] ຂໍເດຊະພຣະເຈົ້າສີພີ
ບຸກຄົນຄືຂ້າພຣະອົງເຖິງຄວາມພິນາດ
ເໝືອນຄວາມພິນາດໃນເງື້ອມມືຂອງພວກສັດຕູ
ເຮັດເຫດທີ່ໃຫ້ເກີດຍົດເຫຼົ່ານີ້ ຄື ວຽກງານ ວິດຊາ
ຄວາມຂະຫຍັນ ການວິວາ ສິນ ແລະຄວາມອ່ອນໂຍນໃຫ້ເສື່ອມໄປ
ບັງເກີດເປັນມະນຸດເຜດດ້ວຍກຳຂອງຕົນ

[໖໗] ຂ້າພຣະອົງນັ້ນບໍ່ມີພວກພ້ອງ ຂາດບ່ອນເພິ່ງ
ເໝືອນຄົນເສື່ອມຈາກຊັບນັບພັນ
ເຫິນຫ່າງຈາກທຳອັນປະເສີດເໝືອນຄົນຕາຍແລ້ວ
[໖໘] ຂ້າພຣະອົງເຮັດຄົນຜູ້ຕ້ອງການຄວາມສຸກໃຫ້ໄດ້ຮັບຄວາມທຸກ
ຈຶ່ງຕົກຢູ່ໃນສະພາບແນວນີ້
ຂ້າພຣະອົງນັ້ນບໍ່ໄດ້ປະສົບຄວາມສຸກເລີຍ
ເໝືອນຢູ່ໃນກອງຖ່ານໄຟ

**ອິນທະຣິຍະຊາດົກທີ ໗ ຈົບ**

## ໘. ອາທິດຕະຊາດົກ (໔໘໔)
## ວ່າດ້ວຍສິ່ງຂອງໃນເຮືອນທີ່ຖືກໄຟໄໝ້

(ພຣະປັດເຈກພຸດທະເຈົ້າກ່າວອະນຸໂມທະນາແດ່ພຣະຣາຊາແລະພຣະເທວີວ່າ)

[໖໙] ເມື່ອເຮືອນຖືກໄຟໄໝ້ ພາຊະນະໃດທີ່ນຳອອກໄດ້
ພາຊະນະນັ້ນກໍເປັນປະໂຫຍດແກ່ເຂົາ
ສ່ວນພາຊະນະທີ່ຖືກໄຟໄໝ້ໃນເຮືອນນັ້ນກໍບໍ່ເປັນປະໂຫຍດເລີຍ
[໗໐] ສັດໂລກຖືກຊະຣາແລະມໍລະນະແຜດເຜົາຢູ່ແນວນີ້
ຊັບທີ່ມະຫາບໍພິດຊົງນຳອອກໃຫ້ທານເປັນອັນຊົງນຳອອກດີແລ້ວ

(ພຣະປັດເຈກພຸດທະເຈົ້າທີ່ເຫຼືອອີກ ໖ ອົງ ກ່າວອະນຸໂມທະນາວ່າ)

[໗໑] ຊົນໃດໃຫ້ທານແກ່ທ່ານຜູ້ໄດ້ທຳ
ບັນລຸທຳດ້ວຍຄວາມຂະຫຍັນໝັ່ນພຽນ
ຊົນນັ້ນຍ່ອມພົ້ນຈາກນະຮົກເວຕະຣະນີຂອງພະຍາຍົມ
ແລ້ວເຂົ້າເຖິງທິບພະຍະສະຖານ

[໗໔]　ທານແລະການຮົບ ນັກປາດກ່າວວ່າ ສະເໝີກັນ
ຄື ຄົນແມ່ນມີຈຳນວນໜ້ອຍກໍຍ່ອມຊະນະຄົນຈຳນວນຫຼາຍໄດ້
ເຖິງຊັບມີຈຳນວນໜ້ອຍ ຫາກມີສັດທາກໍໃຫ້ທານໄດ້
ເພາະຊັບມີຈຳນວນໜ້ອຍນັ້ນແລ
ເຂົາຍ່ອມມີຄວາມສຸກໃນໂລກໜ້າໄດ້

[໗໓]　ພຣະສຸຄົດຊົງສັນເສີນການເລືອກໃຫ້
ທ່ານເຫຼົ່າໃດຄວນແກ່ທັກຂິນາມີຢູ່ໃນມະນຸດໂລກນີ້
ທານທີ່ບຸກຄົນຖວາຍໃນທ່ານເຫຼົ່ານີ້ຍ່ອມມີຜົນຫຼາຍ
ເໝືອນພືດທີ່ຫວ່ານລົງໃນນາທີ່ດີ

[໗໔]　ຜູ້ໃດບໍ່ທໍ່ງວບຽດບຽນໝູ່ສັດ
ບໍ່ເຮັດຄວາມຊົ່ວ ຍ້ອນຢ້ານຄົນອື່ນຕິຕຽນ
ບັນດິດທັງຫຼາຍຍ່ອມສັນເສີນຜູ້ນັ້ນເຊິ່ງຢ້ານການຖືກຕິຕຽນ
ບໍ່ສັນເສີນຜູ້ກ້າໃນການຖືກຕິຕຽນ
ຍ້ອນຢ້ານຕໍ່ການຖືກຕິຕຽນ
ສັດຕະບຸຣຸດທັງຫຼາຍຈຶ່ງບໍ່ເຮັດຄວາມຊົ່ວ

[໗໕]　ບຸກຄົນເກີດເປັນກະສັດດ້ວຍພົມມະຈັນຊັ້ນຕ່ຳ
ເກີດເປັນເທວະດາດ້ວຍພົມມະຈັນຊັ້ນກາງ
ແລະຍ່ອມບໍລິສຸດດ້ວຍພົມມະຈັນຊັ້ນສູງ

[໗໖]　ທານທ່ານສັນເສີນໄວ້ຫຼາຍປະການກໍຈິງ
ແຕ່ທຳທໍ່ນັ້ນປະເສີດກວ່າທານ
ຍ້ອນແຕ່ກ່ອນມາ ສັດຕະບຸຣຸດທັງຫຼາຍຜູ້ມີປັນຍາທໍ່ນັ້ນ
ໄດ້ບັນລຸນິບພານ

**ອາທິດຕະຊາດົກທີ ໗ ຈົບ**

## ໘. ອັດຖານະຊາດົກ (໔໔໕)
## ວ່າດ້ວຍສິ່ງທີ່ເປັນໄປບໍ່ໄດ້

(ມະຫາທະນະລືສີ ກ່າວກັບຍິງໂສເພນີວ່າ)

[໗໗] ເມື່ອໃດແມ່ນ້ຳຄົງຄາເດຍລະດາດດ້ວຍດອກໂກມຸດສະງົບນິ່ງ
ນົກກາເວົາມີຂົນສີຂາວເໝືອນຫອຍສັງແລະຕົ້ນຫວ້າອອກໜ່ວຍເປັນໝາກຕານ
ເມື່ອນັ້ນເຮົາເພິ່ງໄປນຳກັນໄດ້

[໗໘] ເມື່ອໃດຜ້າຫົ່ມຜືນໃຫຍ່ ໓ ຊະນິດທໍດ້ວຍຂົນເຕົ່າ ໃຊ້ຫົ່ມກັນໜາວໄດ້
ເມື່ອນັ້ນເຮົາກັບທ່ານເພິ່ງກ່ງວຂ້ອງກັນໄດ້ແນ່

[໗໙] ເມື່ອໃດປ້ອມຖືກສ້າງຂຶ້ນຢ່າງດີດ້ວຍຂາຍຸງ ໝັ້ນຄົງແລະບໍ່ຫວັ່ນໄຫວ
ເມື່ອນັ້ນເຮົາກັບທ່ານເພິ່ງກ່ງວຂ້ອງກັນໄດ້ແນ່

[໘໐] ເມື່ອໃດຂັ້ນໄດຖືກສ້າງຂຶ້ນຢ່າງດີດ້ວຍເຂົາກະຕ່າຍ
ເພື່ອປະໂຫຍດແກ່ການຂຶ້ນສະຫວັນໄດ້
ເມື່ອນັ້ນເຮົາກັບທ່ານເພິ່ງຢູ່ຮ່ວມກັນໄດ້ແນ່

[໘໑] ເມື່ອໃດໜູທັງຫຼາຍໄຕ່ຂັ້ນໄດໄປກັດກິນດວງຈັນ
ແລະຂັບໄລ່ຣາຫູໄປໄດ້
ເມື່ອນັ້ນເຮົາກັບທ່ານເພິ່ງກ່ງວຂ້ອງກັນໄດ້ແນ່

[໘໔] ເມື່ອໃດແມງວັນທັງຫຼາຍພາກັນບິນທ່ງວໄປເປັນຝູງ
ດື່ມເຫຼົ້າໝົດໄຫແລ້ວ ຢູ່ໃນຖ່ານໄຟໄດ້
ເມື່ອນັ້ນເຮົາກັບທ່ານເພິ່ງກ່ງວຂ້ອງກັນໄດ້ແນ່

[໘໓] ເມື່ອໃດລາມີຮີມປາກເໝືອນໝາກຕຳລຶງສຸກ
ມີໃບໜ້າງາມ ສະຫຼາດໃນການຟ້ອນລຳຂັບຮ້ອງ
ເມື່ອນັ້ນເຮົາກັບທ່ານເພິ່ງກ່ງວຂ້ອງກັນໄດ້ແນ່

[໘໔] ເມື່ອໃດກາແລະນົກເຄົ້າຢູ່ໃນບ່ອນລັບເປີກສາປອງດອງກັນໄດ້
ເມື່ອນັ້ນເຮົາກັບທ່ານເພິ່ງກ່ງວຂ້ອງກັນໄດ້ແນ່

[໘໕] ເມື່ອໃດເອົາໃບບົວອ່ອນທີ່ແຕກຈາກເຫງົ້າ
ມາເຮັດຮົ່ມໃຫ້ແຂງແຮງເພື່ອກັນຝົນ
ເມື່ອນັ້ນເຮົາກັບທ່ານເພິ່ງກ່ງວຂ້ອງກັນໄດ້ແນ່

[໘໖] ເມື່ອໃດນົກນ້ອຍໃຊ້ຈະງອຍປາກຄາບພູຄັນທະມາດບິນໄປໄດ້
ເມື່ອນັ້ນເຮົາກັບທ່ານເພິ່ງກ່ງວຂ້ອງກັນໄດ້ແນ່

[໗໗]	ເມື່ອໃດເດັກນ້ອຍຍົກເຮືອເດີນທະເລ
ພ້ອມທັງເຄື່ອງຍົນແລະໃບເຮືອໄປໄດ້
ເມື່ອນັ້ນເຮົາກັບທ່ານເພິ່ງກ່ຽວຂ້ອງກັນໄດ້ແນ່

**ອັດຖານະຊາດົກທີ ໙ ຈົບ**

## ໑໐. ທີປີຊາດົກ (໔໘໖)
## ວ່າດ້ວຍເສືອເຫຼືອງ

(ແບ້ກ່າວກັບເສືອເຫຼືອງວ່າ)

[໗໘]	ທ່ານລຸງລຳບາກບໍ ພໍຫາກິນໄດ້ສະດວກບໍ ສະບາຍດີບໍ
ແມ່ຂອງຂ້າພະເຈົ້າໄດ້ຖາມເຖິງຄວາມສຸກຂອງລຸງ
ພວກເຮົາຕ້ອງການໃຫ້ລຸງມີຄວາມສຸກ

(ເສືອເຫຼືອງກ່າວກັບແບ້ວ່າ)

[໗໙]	ນີ້ເຈົ້າແບ້ນ້ອຍ ເຈົ້າຢຽບຫາງບຽດບຽນເຮົາ
ມື້ນີ້ ເຈົ້ານັ້ນຄົງຄິດວ່າ ຈະລອດພົ້ນດ້ວຍການກ່າວຄຳວ່າ ລຸງ

(ແບ້ກ່າວວ່າ)

[໘໐]	ລຸງນັ່ງອວ່າຍໜ້າໄປທາງທິດຕາເວັນອອກ
ຂ້າພະເຈົ້າຍ່າງມາຂ້າງໜ້າຂອງລຸງ
ຫາງຂອງລຸງຢູ່ຂ້າງຫຼັງ ຂ້າພະເຈົ້າຢຽບຫາງຂອງລຸງໄດ້ແນວໃດນໍ

(ເສືອເຫຼືອງກ່າວວ່າ)

[໘໑]	ທະວີບທັງ ໔ ພ້ອມທັງມະຫາສະມຸດແລະພູມີປະມານທໍ່ໃດ
ຫາງຂອງເຮົາກໍຄອບຄຸມໄປປະມານທໍ່ນັ້ນ
ເຈົ້າຈະຫຼີບຫາງຂອງເຮົານັ້ນໄດ້ແນວໃດ

(ແບ້ກ່າວວ່າ)

[໘໒]	ເມື່ອກ່ອນ ພໍ່ແມ່ແລະອ້າຍຂອງຂ້າພະເຈົ້າ
ໄດ້ບອກເລື້ອງນີ້ແກ່ຂ້າພະເຈົ້າຄືກັນວ່າ ຫາງຂອງສັດດຸຮ້າຍຍາວ
ຂ້າພະເຈົ້ານັ້ນຈຶ່ງໄດ້ຫຼີກມາທາງອາກາດ

(ເສືອເຫຼືອງກ່າວວ່າ)

[໙໓] ເຈົ້າແບ້ນ້ອຍ ກໍຟູງເນື້ອເຫັນເຈົ້າເຫາະມາຈຶ່ງໄດ້ໜີໄປ
ພັກສາຂອງເຮົາເຈົ້າໄດ້ເຮັດໃຫ້ພິນາດໄປແລ້ວ

(ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ)

[໙໔] ເມື່ອແມ່ແບ້ຄ່ຳຄວນຢູ່ແນວນີ້
ເຈົ້າເສືອເຫຼືອງສັດກິນຊີ້ນແລະເລືອດກໍໂດດເຂົ້າກັດຄໍ
ຄຳເວົ້າສຸພາສິດຍ່ອມບໍ່ມີຜົນໃນຄົນໂຫດຮ້າຍ

[໙໕] ໃນຄົນໂຫດຮ້າຍບໍ່ມີເຫດ ບໍ່ມີຜົນ
ບໍ່ມີຄຳເວົ້າເປັນສຸພາສິດໃນຄົນໂຫດຮ້າຍ
ບຸກຄົນເພິ່ງທຳການຫຼົບຫຼີກໄປ
ຍ້ອນຄຳຂອງຄົນດີເຂົາບໍ່ມັກ

**ທີປິຊາດົກທີ ໑໐ ຈົບ**

**ກັດຈານິວັກ ຈົບ**

## ລວມຊາດົກທີ່ມີໃນວັກນີ້ ຄື

໑. ກັດຈານິຊາດົກ
໒. ອັດຖະສັດທະຊາດົກ
໓. ສຸລະສາຊາດົກ
໔. ສຸມັງຄະລະຊາດົກ
໕. ຄັງຄະມາລະຊາດົກ
໖. ເຈຕິຍະຣາຊະຊາດົກ
໗. ອິນທະຣິຍະຊາດົກ
໘. ອາທິດຕະຊາດົກ
໙. ອັດຖານະຊາດົກ
໑໐. ທີປິຊາດົກ

**ອັດຖະກະນິບາດ ຈົບ**

# ໙. ນະວະກະນິບາດ

## ໑. ຄິຊະນະຊາດົກ (໔໘໗)
## ວ່າດ້ວຍນົກແຮ້ງ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໑] ຫົນທາງທີ່ຄິດຊະບັນພົດຊື່ປະຣິສັງກຸປະຖະມີມາແຕ່ບູຮານ
ໃນຫົນທາງນັ້ນມີນົກແຮ້ງລ້ຽງພໍ່ແມ່ທີ່ແກ່ຢູ່
ມັນໄດ້ນຳເອົານ້ຳມັນຊຸ້ນຂອງງູເຫຼືອມມາໃຫ້ພໍ່ແມ່ກິນສ່ວນຫຼາຍ

[໒] ກໍພໍ່ຂອງແຮ້ງຮູ້ຢູ່ວ່າ ລູກບິນສູງເກີນໄປຈະຕົກ
ຈິ່ງໄດ້ສອນລູກແຮ້ງຊື່ສຸປັດຕະຕົວແຂງແຮງ
ກ້າຫານ ບິນໄປໄດ້ໄກວ່າ

[໓] ລູກ ເມື່ອໃດເຈົ້າຮູ້ວ່າ ແຜ່ນດິນຢູ່ທະເລລ້ອມຮອບ
ກົມເໝືອນວົງລໍ້ລອຍຢູ່ໃນນ້ຳ
ເຈົ້າຈົ່ງກັບສ່ຳນັ້ນ ລູກຢ່າບິນໄປເກີນກວ່ານັ້ນ

[໔] ປັກສາຕົວມີກຳລັງ ເປັນພະຍານົກ ໂຜຂຶ້ນດ້ວຍກຳລັງ
ອ້ງວຄຳແນມເບິ່ງພູແລະປ່າໄມ້

[໕] ນົກແຮ້ງໄດ້ເຫັນແຜ່ນດິນທີ່ມີທະເລລ້ອມຮອບ ກົມເໝືອນວົງລໍ້
ເໝືອນຢ່າງທີ່ໄດ້ຟັງຈາກພໍ່ຂອງມັນ

[໖] ມັນກໍຍັງບິນກາຍສະຖານທີ່ທີ່ບິດາບອກນັ້ນໄປ
ສາຍລົມອັນແຮງກ້າ ກໍໄດ້ພັດກະໜ່ຳນົກແຮ້ງຕົວແຂງແຮງນັ້ນ

[໗] ສັດທີ່ບິນກາຍໄປ ບໍ່ອາດຈະບິນກັບໄດ້ອີກ
ນົກແຮ້ງຕົກຢູ່ໃນອຳນາດຂອງລົມເວຣຳພາ ໄດ້ເຖິງຄວາມພິນາດແລ້ວ

[໘] ລູກເມຍຂອງມັນແລະນົກແຮ້ງເຫຼົ່າອື່ນທີ່ອາໄສມັນເປັນຢູ່
ທັງໝົດເຖິງຄວາມພິນາດ ເພາະນົກທີ່ບໍ່ເຮັດຕາມໂອວາດຕົວດຽວ

[໙] ຜູ້ໃດໃນໂລກນີ້ບໍ່ເຊື່ອຟັງຄຳຂອງຜູ້ໃຫຍ່ທັງຫຼາຍ

ປະພຶດເກີນຂອບເຂດຍ່ອມເດືອດຮ້ອນ
ເໝືອນນົກແຮ້ງທີ່ລະເມີດຄຳສອນ
ຜູ້ນັ້ນແລຍ່ອມເຖິງຄວາມພິນາດ
ຍ້ອນບໍ່ເຮັດນຳຄຳສອນຂອງຜູ້ໃຫຍ່

**ຄິຊະນະຊາດົກທີ ໑ ຈົບ**

## ໔. ໂກສຳພິຍະຊາດົກ (໔໔໗)
## ວ່າດ້ວຍການຜິດຖຽງກັນໃນເມືອງໂກສຳພີ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໑໐] ຄົນຜິດຖຽງກັນມີສຽງດັງຄືກັນໄປໝົດ
ບໍ່ມີໃຜເລີຍຈະຮູ້ສຶກຕົວວ່າເປັນຄົນພານ
ຍິ່ງໄປກວ່ານັ້ນ ເມື່ອສົງແຕກກັນ ກໍບໍ່ຍອມຮັບຮູ້ເຫດແນວອື່ນ

[໑໑] ຄົນຟັ່ນເຟືອນຍົກຕົນວ່າເປັນບັນດິດ ເອົາແຕ່ເວົ້າ
ອ້າປາກເວົ້າຕາມທີ່ຕົວປາຖະໜາ
ແຕ່ບໍ່ຍອມຮັບຮູ້ເລື້ອງທີ່ຜິດຖຽງກັນບໍ່ມີຢາງອາຍ

[໑໔] ຊົນເຫຼົ່າໃດເຂົ້າໄປຜູກເວນວ່າ ຄົນນີ້ໄດ້ດ່າເຮົາ
ໄດ້ຂ້າເຮົາ ໄດ້ຊະນະເຮົາ ແລະໄດ້ລັກສິ່ງຂອງຂອງເຮົາໄປ
ເວນຂອງຊົນເຫຼົ່ານັ້ນຍ່ອມບໍ່ສະງົບຣະງັບ

[໑໓] ສ່ວນຊົນເຫຼົ່າໃດບໍ່ເຂົ້າໄປຜູກເວນວ່າ ຄົນນີ້ໄດ້ດ່າເຮົາ
ໄດ້ຂ້າເຮົາ ໄດ້ຊະນະເຮົາ ແລະໄດ້ລັກສິ່ງຂອງຂອງເຮົາໄປ
ເວນຂອງຊົນເຫຼົ່ານັ້ນຍ່ອມສະງົບຣະງັບ

[໑໔] ເພາະວ່າໃນການໃດ ໆ ເວນທັງຫຼາຍໃນໂລກນີ້
ຍ່ອມບໍ່ສະງົບຣະງັບດ້ວຍເວນ ແຕ່ເວນທັງຫຼາຍ
ຍ່ອມສະງົບຣະງັບດ້ວຍການບໍ່ຈອງເວນ ນີ້ເປັນທຳເກົ່າ

[໑໕] ຊົນພວກອື່ນບໍ່ຮູ້ສຶກວ່າພວກເຮົາຍ່ອມຍ່ອຍຍັບໃນທ່າມກາງສົງນີ້ໄດ້
ສ່ວນຊົນເຫຼົ່າໃດໃນທ່າມກາງສົງນັ້ນຍ່ອມຮູ້ສຶກ
ຕໍ່ຈາກນັ້ນ ຄວາມຜິດຖຽງຂອງຊົນເຫຼົ່ານັ້ນຍ່ອມສະງົບຣະງັບ

[໑໖]　　ຄົນສະໄໝກ່ອນຕັດກະດູກກັນ ຕັດຊີວິດ ປຸ້ນງົວ
ມ້າ ຊັບ ຊ້ຳຍັງຊີງເອົາບ້ານເມືອງກັນ
ແມ່ນຄົນເຫຼົ່ານັ້ນກໍຍັງຄົບກັນໄດ້ ເປັນຫຍັງພວກທ່ານຈຶ່ງຄົບກັນບໍ່ໄດ້

[໑໗]　　ຫາກບຸກຄົນຈະເພິ່ງໄດ້ສະຫາຍຜູ້ມີປັນຍາຮັກສາຕົນ
ເປັນນັກປາດ ມີປົກກະຕິຢູ່ດ້ວຍກຳອັນດີງາມ
ທ່ຽວໄປນຳກັນ ຄອບງຳອັນຕະລາຍທັງປວງແລ້ວ
ມີສະຕິ ພໍໃຈ ເພິ່ງທ່ຽວໄປກັບສະຫາຍນັ້ນເທີ້ນ

[໑໘]　　ຫາກບຸກຄົນບໍ່ໄດ້ສະຫາຍຜູ້ມີປັນຍາຮັກສາຕົນ
ເປັນນັກປາດ ມີປົກກະຕິຢູ່ດ້ວຍກຳອັນດີງາມ
ທ່ຽວໄປນຳກັນ ເພິ່ງທ່ຽວໄປຜູ້ດຽວ
ເໝືອນພຣະຣາຊາຊົງລະແຄວ້ນທີ່ຊົງຊະນະແລ້ວສະເດັດໄປພຣະອົງດຽວ
ແລະເໝືອນຊ້າງມາຕັງຄະທ່ຽວໄປຕົວດຽວໃນປ່າ

[໑໙]　　ການທ່ຽວໄປຂອງບຸກຄົນຜູ້ດຽວເປັນຄວາມປະເສີດ
ຍ້ອນຄວາມເປັນສະຫາຍບໍ່ມີໃນຄົນພານ
ອັນໜຶ່ງ ບຸກຄົນຄວນມີຄວາມຂວນຂວາຍໜ້ອຍ
ທ່ຽວໄປຜູ້ດຽວ ບໍ່ເພິ່ງທຳຄວາມຊົ່ວ
ເໝືອນຊ້າງມາຕັງຄະທ່ຽວໄປຕົວດຽວໃນປ່າ

**ໂກສຳພິຍະຊາດົກທີ ໘ ຈົບ**

## ៩. ມະຫາສຸວະຣາຊະຊາດົກ (໔໘໙)
## ວ່າດ້ວຍພະຍານົກແຂກເຕົ້າ

(ທ້າວສັກກະຕັດກັບພະຍານົກແຂກເຕົ້າວ່າ)

[໒໐]　　ເມື່ອໃດຕົ້ນໄມ້ມີໝາກບໍລິບູນ
ເມື່ອນັ້ນເຫຼົ່າວິຫົກກໍພາກັນມາຈິກກິນໝາກໄມ້ນັ້ນ
ເມື່ອຮູ້ວ່າ ເມື່ອໝາກວາຍ ຕົ້ນໄມ້ໝົດສິ້ນໄປແລ້ວ
ກໍພາກັນຈາກຕົ້ນໄມ້ນັ້ນໄປຕົວລະທິດລະທາງ

[໒໑]　　ພໍ່ນົກແຂກເຕົ້າຜູ້ມີຈະງອຍປາກແດງ

ເຈົ້າຈົ່ງຫ່ວງໄປເທີ້ນ ຢ່າຫາບ່ອນຕາຍເລີຍ
ເຈົ້າມາຊົບເຊົາຢູ່ເທິງຕໍ່ໄມ້ແຫ້ງເຮັດຫຍັງ
ເຈົ້ານົກແຂກເຕົ້າຜູ້ມີສີຂຽວເໝືອນເຂດປ່າໃນວະສັນຕະລະດູ
ເຈົ້າບອກເຮົາເທີ້ນ ເຫດໃດ ເຈົ້າຈຶ່ງບໍ່ລະຖິ້ມຕົ້ນໄມ້ແຫ້ງນີ້

(ພະຍານົກແຂກເຕົ້າກ່າວວ່າ)

[໔໘] ພະຍາທີ່ງ ຊົນເຫຼົ່າໃດເປັນເພື່ອນຮ່ວມສຸກຮ່ວມທຸກຈົນຕະຫຼອດຊີວິດ
ແມ່ນເພື່ອນນັ້ນຈະສິ້ນຊັບຫຼືບໍ່ສິ້ນຊັບກໍຕາມ ກໍບໍ່ຍອມລະຖິ້ມກັນ
ຊົນເຫຼົ່ານັ້ນນັບວ່າເປັນສັດຕະບຸຣຸດຣະນຶກເຖິງທຳຂອງສັດຕະບຸຣຸດຢູ່ສະເໝີ

[໔໙] ພະຍາທີ່ງ ຂ້າພະເຈົ້າກໍເປັນໜຶ່ງໃນໝູ່ສັດຕະບຸຣຸດ
ຕົ້ນໄມ້ເປັນທັງຍາດເປັນທັງສະຫາຍຂອງຂ້າພະເຈົ້າ
ຂ້າພະເຈົ້າຕ້ອງການມີຊີວິດຢູ່ ທັງທີ່ຮູ້ວ່າຕົ້ນໄມ້ໝົດສິ້ນແລ້ວ
ກໍບໍ່ອາດປະຖິ້ມໄປໄດ້
ຍ້ອນການທອດຖິ້ມໄປນັ້ນບໍ່ແມ່ນທຳ

(ທ້າວສັກກະຕັດວ່າ)

[໔໔] ເປັນການດີເຈົ້າປັກສີທີ່ເຈົ້າໄດ້ທຳຄວາມເປັນເພື່ອນ
ໄມຕີແລະຄວາມສະໜິດສະໜົມໃນໝູ່ພວກ
ຖ້າຄຸນນະທຳຂໍ້ນີ້ເຈົ້າພໍໃຈ
ເຈົ້າກໍເປັນທີ່ສັນເສີນຂອງຜູ້ຮູ້ທັງຫຼາຍ

[໔໕] ນີ້ເຈົ້ານົກແຂກເຕົ້າຜູ້ມີປີກບິນໄປໃນອາກາດ
ເຮົານັ້ນຈະໃຫ້ພອນແກ່ເຈົ້າ
ເຈົ້າຈົ່ງເລືອກພອນຈັກຢ່າງໜຶ່ງຕາມທີ່ເຈົ້າພໍໃຈເທີ້ນ

(ພະຍານົກແຂກເຕົ້າກ່າວວ່າ)

[໔໖] ພະຍາທີ່ງ ຫາກທ່ານຈະໃຫ້ພອນແກ່ຂ້າພະເຈົ້າ
ກໍຂໍໃຫ້ຕົ້ນໄມ້ຕົ້ນນີ້ມີອາຍຸຕໍ່ໄປ
ຂໍຕົ້ນໄມ້ນັ້ນຈົ່ງງອກງາມມີງ່າແລະໝາກສົມບູນ
ເປັນໜ່ວຍມີຣົດແຊບ ຢືນຕົ້ນສະງ່າງາມເທີ້ນ

(ທ້າວສັກກະຕັດວ່າ)

[໔໗] ເພື່ອນ ເຈົ້າຈົ່ງເຫັນຕົ້ນໄມ້ນັ້ນມີໜ່ອຍດີກ
ຂໍເຈົ້າຈົ່ງຢູ່ຮ່ວມກັນກັບຕົ້ນໝາກເດື່ອເທີ້ນ
ຂໍຕົ້ນໄມ້ນັ້ນຈົ່ງງອກງາມມີງ່າແລະໝາກສົມບູນ
ເປັນໜ່ອຍມີຣົດແຊບ ຍືນຕົ້ນສະງ່າງາມເທີ້ນ

(ພະຍານົກແຂກເຕົ້າກ່າວວ່າ)

[໔໘] ທ້າວສັກກະ ວັນນີ້ຂ້າພຣະອົງມີຄວາມສຸກຍ້ອນເຫັນຕົ້ນໄມ້ມີໜ່ອຍສັນໃດ
ຂໍພຣະອົງພ້ອມທັງພຣະປະຍູນຍາດທັງປວງຈົ່ງມີຄວາມສຸກສັນນັ້ນເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໔໙] ທ້າວສັກກະເມື່ອປະທານພອນ
ບັນດານໃຫ້ຕົ້ນໄມ້ມີໝາກແກ່ນົກແຂກເຕົ້າແລ້ວ
ພ້ອມດ້ວຍພຣະມະເຫສີ ກໍສະເດັດຫຼີກໄປສູ່ສວນແຫ່ງເທບນັນທະວັນ

**ມະຫາສຸວະຣາຊະຊາດົກທີ ໓ ຈົບ**

## ໔. ຈູລະສຸວະກະຣາຊະຊາດົກ (໔໓໐)
## ວ່າດ້ວຍພະຍານົກແຂກເຕົ້າ

(ທ້າວສັກກະຕັດຖາມພະຍານົກແຂກເຕົ້າວ່າ)

[໕໐] ໝູ່ຕົ້ນໄມ້ມີໃບຂຽວຊະອຸ່ມ ມີໝາກດາດດື່ນ ມີຢູ່ເປັນຈຳນວນຫຼາຍ
ເປັນຫຍັງນໍ ໃຈຂອງນົກແຂກເຕົ້າ
ຈຶ່ງຍິນດີຕົ້ນໄມ້ແຫ້ງເປັນໂພ້ງບໍ່ສ່າງຊາ

(ພະຍານົກແຂກເຕົ້າຕອບວ່າ)

[໕໑] ໝາກຂອງຕົ້ນໄມ້ນີ້ ຂ້າພະເຈົ້າອາໄສກິນຢູ່ຫຼາຍປີ
ແມ່ນບໍ່ມີໝາກ ຂ້າພະເຈົ້າຮູ້ແລ້ວ ແຕ່ກໍຍັງຮັກສາໄມຕີນັ້ນໄວ້ຄືເກົ່າ

(ທ້າວສັກກະຕັດຖາມວ່າ)

[໑໔]　ຕົ້ນໄມ້ແຫ້ງ ຕົ້ນໄມ້ເປັນໂພ້ງ ແລະຕົ້ນໄມ້ປາສະຈາກໃບແລະໝາກ
ຝູງນົກກໍພາກັນລະຖິ້ມໄປ ນີ້ນົກນ້ອຍ ເຈົ້າເຫັນໂທດອັນໃດ?

(ພະຍານົກແຂກເຕົ້າຕອບວ່າ)

[໑໑]　ນົກເຫຼົ່າໃດຕ້ອງການໝາກໄມ້ຈຶ່ງຄົບຫາ
ຮູ້ວ່າບໍ່ມີໝາກກໍລະຖິ້ມຕົ້ນໄມ້ນັ້ນໄປ
ນົກເຫຼົ່ານັ້ນເປັນພວກເຫັນແຕ່ປະໂຫຍດສ່ວນຕົນ
ບໍ່ດີ ເປັນຜູ້ທຳລາຍພວກພ້ອງ

(ທ້າວສັກກະຕັດວ່າ)

[໑໔]　ເປັນການດີ ເຈົ້າປັກສາ ທີ່ເຈົ້າໄດ້ທຳຄວາມເປັນເພື່ອນໄມຕີ
ແລະຄວາມສະໜິດສະໜົມໃນໝູ່ພວກ
ຖ້າຄຸນນະທຳຂໍ້ນີ້ເຈົ້າພໍໃຈ
ເຈົ້າກໍເປັນທີ່ສັນເສີນຂອງຜູ້ຮູ້ທັງຫຼາຍ

[໑໕]　ນີ້ເຈົ້ານົກແຂກເຕົ້າຜູ້ມີປີກບິນໄປໃນອາກາດ
ເຮົານັ້ນຈະໃຫ້ພອນແກ່ເຈົ້າ
ເຈົ້າຈົ່ງເລືອກພອນມາຈັກຂໍ້ໜຶ່ງຕາມທີ່ເຈົ້າພໍໃຈເທີ້ນ

(ພະຍານົກແຂກເຕົ້າກ່າວວ່າ)

[໑໖]　ເຮັດຈັ່ງໃດນໍ? ຂ້າພະເຈົ້າຈະເພິ່ງເຫັນຕົ້ນໄມ້ນີ້ກັບມີໃບມີໝາກໄດ້ອີກ
ຂ້າພະເຈົ້າຈະເພິ່ງຍິນດີຢ່າງຍິ່ງເໝືອນຄົນຈົນໄດ້ຂຸມຊັບ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໑໗]　ລຳດັບນັ້ນ ທ້າວສັກກະຊົງຖືເອົານ້ຳອຳມະຣິດຣົດຕົ້ນໄມ້
ງ່າຂອງຕົ້ນໄມ້ນັ້ນກໍແຕກອອກມາ ມີເງົາຮົ່ມເຢັນ ໜ້າຮື່ນຣົມໃຈ

(ພະຍານົກແຂກເຕົ້າກ່າວວ່າ)

[໑໘]　ທ້າວສັກກະ ວັນນີ້ຂ້າພຣະອົງມີຄວາມສຸກເພາະເຫັນຕົ້ນໄມ້ມີຜົນສັນໃດ
ຂໍພຣະອົງພ້ອມທັງພຣະປະຍູນຍາດທັງປວງຈົ່ງມີຄວາມສຸກສັນນັ້ນເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໓໗] ທ້າວສັກກະເມື່ອປະທານພອນ
ບັນດານໃຫ້ຕົ້ນໄມ້ມີໝາກແກ່ນົກແຂກເຕົ້າແລ້ວ
ພ້ອມດ້ວຍພຣະມະເຫສີ ກໍສະເດັດຫຼີກໄປສູ່ສວນເທບນັນທະວັນ

**ຈູລະສຸວະກະຣາຊະຊາດົກທີ ໔ ຈົບ**

## ໕. ຫະຣິຕະຈະຊາດົກ (໔໓໑)
## ວ່າດ້ວຍຫະຣິຕະຈະດາບົດໂພທິສັດ

(ພຣະຣາຊາຕັດຖາມຫະຣິຕະຈະດາບົດວ່າ)

[໔໐] ທ່ານມະຫາພົມ ຂ້ານ້ອຍຮູ້ຂ່າວມາວ່າ
ຫະຣິຕະຈະດາບົດບໍຣິໂພກກາມ ຄຳກ່າວນັ້ນຄົງເປັນການຕົວະແມ່ນບໍ່
ພຣະຜູ້ເປັນເຈົ້າຍັງບໍລິສຸດຢູ່ແມ່ນບໍ່

(ຫະຣິຕະຈະດາບົດຂາບທູນວ່າ)

[໔໑] ຂໍຖວາຍພຣະພອນມະຫາບໍພິດ
ຂໍ້ນີ້ເປັນຈິງຕາມທີ່ພຣະອົງໄດ້ຊົງສະດັບມາ
ອາດຕະມາພາບມົກມຸ້ນຢູ່ໃນກາມມະຄຸນອັນເຮັດໃຫ້ລຸ່ມຫຼົງ
ໄດ້ເດີນທາງຜິດໄປແລ້ວ

(ພຣະຣາຊາຕັດວ່າ)

[໔໒] ໃຈບັນເທົາຣາຄະທີ່ເກີດຂື້ນບໍ່ໄດ້ດ້ວຍປັນຍາໃດ
ປັນຍານັ້ນເປັນທຳມະຊາດລະອຽດ
ຄິດແຕ່ສິ່ງທີ່ດີ ໆ ຈະມີປະໂຫຍດອັນໃດ
ທ່ານບໍ່ອາດບັນເທົາຈິດໄດ້ບໍ

(ຫະຣິຕະຈະດາບົດຂາບທູນວ່າ)

[໔໓] ຂໍຖວາຍພຣະພອນມະຫາບໍພິດ ໃນໂລກນີ້ມີສິ່ງທີ່ຫຍາບ
ມີກຳລັງຢ່າງຍິ່ງທີ່ປັນຍາຢັ່ງຮູ້ບໍ່ເຖິງ ໔ ປະການ ຄື

໑. ຣາຄະ (ຄວາມກຳໜັດ) ໒. ໂທສະ (ຄວາມໂກດ)
໓. ມະທະ (ຄວາມເມົາ) ໔. ໂມຫະ (ຄວາມຫຼົງ)

(ພຣະຣາຊາຕັດວ່າ)

[໔໔] ຂ້ານ້ອຍໄດ້ຍົກຍ້ອງພຣະຜູ້ເປັນເຈົ້າໄວ້ວ່າ
ທ່ານທະຣິຕະຈະດາບົດເປັນພຣະອະຣະຫັນ ເຖິງພ້ອມດ້ວຍສິນ
ປະພຶດບໍລິສຸດ ເປັນນັກປາດ ເປັນບັນດິດ

(ທະຣິຕະຈະດາບົດຂາບທູນວ່າ)

[໔໕] ຂໍຖວາຍພຣະພອນມະຫາບໍພິດ ລືສີແມ່ນມີປັນຍາ
ຍິນດີແລ້ວໃນຄຸນນະທຳ ຍັງຖືກຄວາມຄິດລາມົກປະກອບດ້ວຍຣາຄະ
ທີ່ຍຶດຖືວ່າງາມ ບຽດບຽນເອົາໄດ້

(ພຣະຣາຊາຕັດວ່າ)

[໔໖] ຣາຄະທີ່ເກີດຂຶ້ນໃນສະຣີຣະນີ້ເກີດຂຶ້ນແລ້ວເປັນເຫດປະທຸດສະຮ້າຍຜິວພັນ
ພຣະຜູ້ເປັນເຈົ້າຈົ່ງລະຣາຄະນັ້ນສາ ຂໍຄວາມນອບນ້ອມຈົ່ງມີແດ່ພຣະຜູ້ເປັນເຈົ້າ
ພຣະຜູ້ເປັນເຈົ້າໄດ້ຮັບຍ້ອງຍໍວ່າ ເປັນນັກປາດຂອງຄົນທັງຫຼາຍ

(ທະຣິຕະຈະດາບົດຂາບທູນວ່າ)

[໔໗] ອາດຕະມາພາບຈັກຄົ້ນຫາຮາກເຫງົ້າຂອງກາມເຫຼົ່ານັ້ນ
ທີ່ເຮັດໃຫ້ມືດບອດ ມີທຸກຫຼາຍ ມີພິດຮ້າຍແຮງ
ຈັກຕັດຣາຄະພ້ອມທັງເຄື່ອງຜູກ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໔໘] ເມື່ອກ່າວແລ້ວຢ່າງນີ້ ທະຣິຕະຈະລືສີຜູ້ຍຶດໝັ້ນສັດຈະ
ຄາຍກາມຣາຄະແລ້ວ ເປັນຜູ້ເຂົ້າເຖິງພົມມະໂລກ

**ທະຣິຕະຈະຊາດົກທີ ໕ ຈົບ**

## ໖. ປະທະກຸສະລະມານະວະຊາດົກ (໔໓໘)
## ວ່າດ້ວຍມານົບຜູ້ສະຫຼາດໃນການສະກົດຮອຍ

(ພັນລະຍາກ່າວກັບນາຍປາຕະລິຜູ້ເປັນສາມີວ່າ)

[໔໙] ແມ່ນ້ຳຄົງຄາຍ່ອມພັດພາອ້າຍປາຕະລີຜູ້ຄົງແກ່ຮຽນຂັບເພງໄດ້ໄພເລາະ
ແນ່ະ ອ້າຍຜູ້ກຳລັງຖືກນ້ຳພັດໄປ ຂໍຄວາມຈະເລີນຈົ່ງມີແກ່ອ້າຍ
ຂໍອ້າຍຈົ່ງຫຼິ້ນເພງຈັກເພງໜຶ່ງໃຫ້ແກ່ນ້ອງເທີ້ນ

(ສາມີກ່າວວ່າ)

[໕໐] ນ້ຳໃດທີ່ເຂົາໃຊ້ຫົດຄົນປະສົບທຸກຫຼືຄົນກະສັບກະສ່າຍ
ເຮົາກຳລັງຈະຕາຍໃນທ່າມກາງນ້ຳນັ້ນ ໄພເກີດແລ້ວແຕ່ບ່ອນເພິ່ງ

(ຊ່າງໝໍ້ກ່າວວ່າ)

[໕໑] ແຜ່ນດິນໃດທີ່ພືດທັງຫຼາຍງອກຂຶ້ນໄດ້ຫຼືທີ່ສັດທັງຫຼາຍດຳຣົງຢູ່
ແຜ່ນດິນນັ້ນກຳລັງບີບຫົວຂອງຂ້າພະເຈົ້າ ໄພເກີດແລ້ວໃນບ່ອນເພິ່ງ

(ຊາຍຄົນໜຶ່ງກ່າວວ່າ)

[໕໒] ໄຟໃດທີ່ເຂົາໃຊ້ຫຸງເຂົ້າ ຫຼືທີ່ເຂົາໃຊ້ບຳບັດຄວາມໜາວ
ໄຟນັ້ນກຳລັງໄໝ້ຕົວຂ້າພະເຈົ້າ ໄພເກີດແລ້ວໃນບ່ອນເພິ່ງ

(ຊາຍຄົນໜຶ່ງກ່າວວ່າ)

[໕໓] ເຂົ້າໃດທີ່ພວກພາມແລະກະສັດຈຳນວນຫຼາຍໃຊ້ຍັງຊີບ
ເຂົ້ານັ້ນຂ້າພະເຈົ້າບໍຣິໂພກແລ້ວກຳລັງຈະຂ້າຂ້າພະເຈົ້າ ໄພເກີດແລ້ວໃນບ່ອນເພິ່ງ

(ຊາຍຄົນໜຶ່ງກ່າວວ່າ)

[໕໔] ລົມໃດໃນເດືອນທ້າຍຂອງລະດູຮ້ອນທີ່ພວກບັນດິດປາຖະໜາ
ລົມນັ້ນກຳລັງທຳລາຍຕົວຂ້າພະເຈົ້າ ໄພເກີດແລ້ວໃນບ່ອນເພິ່ງ

(ພະຍານາກກ່າວວ່າ)

[໕໕] ຕົ້ນໄມ້ໃດທີ່ນົກພາກັນມາອາໄສ ຕົ້ນໄມ້ນັ້ນກຳລັງພົ່ນໄຟ
ນົກທັງຫຼາຍພາກັນຫຼົບໜີໄປສູ່ທິດທັງຫຼາຍ ໄພເກີດແລ້ວໃນບ່ອນເພິ່ງ

(ຍິງຊະຣາກ່າວກັບລູກຊາຍວ່າ)

[໕໖] ຍິງສະໃພ້ໃດຜູ້ມີຄວາມພໍໃຈ ປະດັບປະດາດ້ວຍພວງດອກໄມ້

ລູບໄລ້ທາດ້ວຍຈັນທອນທີ່ເຮົານຳມາ
ຍິງສະໃພ້ນັ້ນກຳລັງໄລ່ເຮົາອອກຈາກເຮືອນ ໄພເກີດແລ້ວໃນບ່ອນເພິ່ງ

(ຊາຍຊະຣາຄ່ຳຄວນວ່າ)

[໔໗] ລູກຄົນໃດທີ່ເກີດມາແລ້ວເປັນເຫດໃຫ້ເຮົາຍິນດີ
ແລະປາຖະໜາຄວາມຈະເລີນ
ລູກຄົນນັ້ນກຳລັງໄລ່ເຮົາອອກຈາກເຮືອນ ໄພເກີດແລ້ວໃນບ່ອນເພິ່ງ

(ພຣະໂພທິສັດກ່າວວ່າ)

[໔໘] ຂໍຊາວຊົນນະບົດແລະຊາວນິຄົມທີ່ມາປະຊຸມພ້ອມກັນຈົ່ງຟັງຂ້າພະເຈົ້າ
ບ່ອນໃດມີນ້ຳ ບ່ອນນັ້ນກັບຮ້ອນ
ບ່ອນໃດປອດໄພ ບ່ອນນັ້ນກັບມີໄພ

[໔໙] ພຣະຣາຊາແລະພາມປຸໂຣຫິດປຸ້ນແວ່ນແຄວ້ນ
ທ່ານທັງຫຼາຍຈົ່ງພາກັນຮັກສາຕົວຢູ່ເທີ້ນ
ໄພເກີດແລ້ວໃນບ່ອນເພິ່ງ

**ປະທະກຸສະລະມານະວະຊາດົກທີ ໓ ຈົບ**

## ໗. ໂລມະສະກັດສະປະຊາດົກ (໔໓໓)
## ວ່າດ້ວຍໂລມະສະກັດສະປະລືສີ

(ທ້າວສັກກະຕັດກັບພຣະຣາຊາວ່າ)

[໕໐] ຂ້າແດ່ມະຫາຣາດ ຫາກພຣະອົງໃຫ້ລືສີໂລມະສະກັດສະປະບູຊາຍັນໄດ້
ພຣະອົງຈະເປັນເໝືອນພຣະອິນ ບໍ່ແກ່ ບໍ່ຕາຍເລີຍ

(ລືສີໂລມະສະກັດສະປະກ່າວກັບໄສທະອຳມາດວ່າ)

[໕໑] ອາດຕະມາບໍ່ປາຖະໜາແຜ່ນດິນອັນມີມະຫາສະມຸດເປັນຂອບເຂດ
ມີສາຄອນລ້ອມຮອບຄືດັ່ງຕຸ້ມຫູ ພ້ອມກັບຄຳນິນທາ
ທ່ານຈົ່ງຮູ້ແນວນີ້ເທີ້ນ ໄສທະອຳມາດ

[໕໒] ພາມ ໜ້າຕິຕຸງນການໄດ້ຍົດ

ແລະການໄດ້ຊັບສຳລັບລ້ຽງຊີວິດ
ເຊິ່ງເປັນເຫດໃຫ້ປະສົບຄວາມພິນາດ
ຫຼືປະພຶດບໍ່ເປັນທຳ

[໗໓] ເຖິງແມ່ນເຮົາຈະເປັນນັກບວດຖືບາດລ້ຽງຊີບ
ການລ້ຽງຊີບເຊັ່ນນັ້ນແລຍັງດີກວ່າການສະແຫວງຫາໂດຍບໍ່ຊອບທຳ

[໗໔] ເຖິງແມ່ນເຮົາຈະເປັນນັກບວດຖືບາດລ້ຽງຊີບ
ບໍ່ບຽດບຽນຜູ້ອື່ນໃນໂລກ
ການລ້ຽງຊີບເຊັ່ນນັ້ນແລຍັງດີກວ່າການຄອງຣາດຊະສົມບັດ

(ປະຊາຊົນທີ່ມາປະຊຸມກັນກ່າວວ່າ)

[໗໕] ດວງຈັນກໍມີກຳລັງ ດວງອາທິດກໍມີກຳລັງ
ສະມະນະແລະພາມທັງຫຼາຍກໍມີກຳລັງ ຝັ່ງມະຫາສະມຸດກໍມີກຳລັງ
ແຕ່ຍິງທັງຫຼາຍມີກຳລັງເໜືອກວ່າກຳລັງທັງໝົດ

[໗໖] ເພາະພຣະນາງຈັນທິວະດີໄດ້ໃຊ້ລືສີຊື່ໂລມະສະກັດສະປະ
ເຊິ່ງມີຕະບະສູງບູຊາຍັນຊື່ ວາຊະເປີຍຍະ ເພື່ອປະໂຫຍດແກ່ພຣະບິດາໄດ້

(ລືສີໂລມະສະກັດສະປະສະຫຼົດໃຈ ຈຶ່ງກ່າວວ່າ)

[໗໗] ກຳທີ່ທຳດ້ວຍຄວາມໂລບມີກາມເປັນເຫດນັ້ນ
ເປັນກຳເຜັດຮ້ອນ
ເຮົາຈັກຄົ້ນຫາຮາກເຫງົ້າຂອງກຳນັ້ນ
ຈັກຕັດຣາຄະພ້ອມທັງເຄື່ອງຜູກ

[໗໘] ໜ້າຕິຕຽນ ກາມທັງຫຼາຍທີ່ຫຼວງຫຼາຍໃນໂລກ
ຂໍຖວາຍພຣະພອນມະຫາບໍພິດ
ຕະບະທີ່ນັ້ນປະເສີດກວ່າກາມມະຄຸນທັງຫຼາຍ
ອາດຕະມາຈະລະກາມ ພໍ່າເພັງຕະບະ
ສ່ວນແວ່ນແຄວ້ນແລະພຣະນາງຈັນທະວະດີ ຂໍຖວາຍຄືນມະຫາບໍພິດ

**ໂລມະສະກັດສະປະຊາດົກທີ ໗ ຈົບ**

# ໗. ຈັກກະວາກະຊາດົກ (໔໓໔)
## ວ່າດ້ວຍນົກຈັກກະພາກ

(ກາຖາມນົກຈັກກະພາກວ່າ)

[໓໙] ເຮົາຂໍຖາມນົກທັງຫຼາຍທີ່ມີສີເໝືອນຜ້າທີ່ຍ້ອມດ້ວຍນ້ຳຝາດ
ມີໃຈຮ່າເຣີງ ທ່ຽວໄປເປັນຄູ່ ໆ ວ່າ
ນົກທັງຫຼາຍສັນເສີນພວກເຈົ້າໃນໝູ່ມະນຸດວ່າ ເປັນນົກຊະນິດໃດ
ເຊີນພວກເຈົ້າບອກນົກຊະນິດນັ້ນແກ່ເຮົາເທີ້ນ

(ນົກຈັກກະພາກຕອບວ່າ)

[໘໐] ນີ້ເຈົ້າຜູ້ບຽດບຽນມະນຸດ ໃນໝູ່ມະນຸດ
ເຂົາຮຽກພວກເຮົາເຊິ່ງບິນຕາມກັນໄປວ່າ ນົກຈັກກະພາກ
ໃນໝູ່ນົກ ພວກເຮົາໄດ້ຮັບການຍ້ອງຍໍວ່າ ມີຄວາມດີ ມີຮູບງາມ
ທ່ຽວໄປຕາມແມ່ນ້ຳ (ທັງບໍ່ເຮັດຊົ່ວແມ່ນຍ້ອນເຫດແຫ່ງອາຫານ)

(ກາຖາມວ່າ)

[໘໑] ນີ້ນົກຈັກກະພາກ ພວກທ່ານກິນໝາກໄມ້ອັນໃດໃນແມ່ນ້ຳ
ຫຼືກິນຊີ້ນແຕ່ບ່ອນໃດ ກິນອາຫານອັນໃດ
ກຳລັງແລະຜິວພັນຈຶ່ງບໍ່ເສື່ອມຊາມ ບໍ່ຜິດຮູບເລີຍ

(ນົກຈັກກະພາກຕອບວ່າ)

[໘໔] ໃນແມ່ນ້ຳບໍ່ມີໝາກໄມ້ດອກກາ
ຊີ້ນສຳລັບນົກຈັກກະພາກກິນຈະມີແຕ່ບ່ອນໃດ
ພວກເຮົາມີສາຫຣ່າຍເປັນພັກສາ ບໍ່ກິນຊີ້ນສັດ
ທັງບໍ່ເຮັດຊົ່ວແມ່ນຍ້ອນເຫດແຫ່ງອາຫານ
(ພວກເຮົາຈຶ່ງມີຮູບງາມ ທ່ອງທ່ຽວໄປຕາມແມ່ນ້ຳ)

(ກາກ່າວວ່າ)

[໘໓] ນົກຈັກກະພາກ ອາຫານທີ່ເຈົ້າກິນນີ້ ເຮົາບໍ່ມັກເລີຍ
ເມື່ອເຈົ້າເປັນນົກຈັກກະພາກ ເຈົ້າກໍມີອາຫານທີ່ເໝາະສົມ

ເມື່ອກ່ອນນີ້ເຮົາໄດ້ມີຄວາມຄິດເປັນແນວອື່ນ
ຍ້ອນເຫດນັ້ນແລ ເຮົາຈຶ່ງເກີດຄວາມສົງໄສໃນຜິວພັນຂອງເຈົ້ານີ້

[໗໔] ເຖິງເຮົາກໍກິນຊີ້ນ ໝາກໄມ້ ແລະເຂົ້າທີ່ປຸງດ້ວຍເກືອແລະນໍ້ານົມ
ເຮົາກິນອາຫານອັນມີຣົດເລີດໃນໝູ່ມະນຸດ
ເໝືອນຜູ້ກ້າຫານ ມີໄຊຊະນະໃນສົງຄາມ
ເຫດໃດຜິວພັນຂອງເຮົາຈຶ່ງບໍ່ເປັນເຊັ່ນກັບເຈົ້ານໍ ນົກຈັກກະພາກເອີຍ

(ນົກຈັກກະພາກກ່າວວ່າ)

[໗໕] ເຈົ້າກິນຂອງທີ່ບໍ່ບໍລິສຸດ ເວີ່ນເອົາເມື່ອເຂົາເຜີ
ຊື່ວ່າໄດ້ເຂົ້າແລະນໍ້າດ້ວຍຄວາມລຳບາກ
ກາ ເຈົ້າບໍ່ມັກໝາກໄມ້ຫຼືຊີ້ນກາງປ່າຊ້າ

[໗໖] ນີ້ກາ ຜູ້ໃດໄດ້ຂອງກິນ ມາດ້ວຍກຳອັນຫຍາບຊ້າ
ເມື່ອເຂົາເຜີກໍເວີ່ນເອົາມາກິນ
ໃນພາຍຫຼັງ ຜູ້ນັ້ນ ຕົນເອງກໍຕິຕຽນ
ແລະເຂົາຖືກຕົນແລະຜູ້ອື່ນຕິຕຽນແລ້ວ ຍ່ອມລະຜິວພັນແລະກຳລັງ

[໗໗] ຫາກວ່າຜູ້ໃດບໍຣິໂພກຂອງແມ່ນໜ້ອຍ ແຕ່ເປັນຂອງເຢັນ
ບໍ່ບຽດບຽນຜູ້ອື່ນດ້ວຍກຳທີ່ບໍ່ຫຍາບຊ້າ
ຜູ້ນັ້ນຍ່ອມມີທັງກຳລັງແລະຜິວພັນໃນການນັ້ນ
ຍ້ອນຜິວພັນທັງປວງບໍ່ແມ່ນມີຍ້ອນອາຫານພຽງຢ່າງດຽວ

**ຈັກກະວາກະຊາດົກທີ ໗ ຈົບ**

## ໘. ຫະລິດທະຣາຄະຊາດົກ (໔໓໕)
## ວ່າດ້ວຍຈິດກັບກອກເໝືອນຜ້າຍ້ອມດ້ວຍຂີ້ມີ້ນ

(ນາງກຸມາຣີກາກ່າວກັບດາບົດໜຸ່ມວ່າ)

[໗໘] ພວກທີ່ພໍ່າເພັງຕະບະອົດກັ້ນຢູ່ໃນບ້ານຍັງປະເສີດກວ່າທ່ານ
ຜູ້ອົດກັ້ນພໍ່າເພັງຕະບະຢູ່ໃນເສນາສະນະອັນສະຫງັດໃນປ່າ

(ດາບົດໜຸ່ມຖາມດາບົດຜູ້ເປັນບິດາວ່າ)

[໗໙]　　ທ່ານພໍ່ ລູກອອກຈາກປ່າໄປສູ່ບ້ານແລ້ວ
ຄວນຈະຄົບຫາຄົນມີສິນແນວໃດ ມີຂໍ້ປະຕິບັດແນວໃດ
ລູກຖາມແລ້ວ ຂໍພໍ່ຈົ່ງບອກຂໍ້ນັ້ນ

(ດາບົດຜູ້ເປັນບິດາຕອບວ່າ)

[໘໐]　　ລູກຮັກ ຜູ້ໃດເພິ່ງເຮັດໃຫ້ລູກເບົາໃຈ
ອົດທົນຄວາມຄຸ້ນເຄີຍຂອງລູກໄດ້
ເຊື່ອຟັງແລະອົດກັ້ນຄຳເວົ້າຂອງລູກໄດ້
ລູກໄປຈາກບ່ອນນີ້ແລ້ວ ຈົ່ງຄົບຜູ້ນັ້ນເທີ້ນ

[໘໑]　　ຜູ້ໃດບໍ່ເຮັດຄວາມຊົ່ວທາງກາຍ ວາຈາ ໃຈ
ລູກໄປຈາກບ່ອນນີ້ແລ້ວ ຈົ່ງດຳຣົງຕົນຢູ່ເໝືອນລູກໃນໄສ້ຂອງຄົນຜູ້ນັ້ນເທີ້ນ

[໘໒]　　ອັນໜຶ່ງ ຜູ້ໃດປະພຶດທຳ
ແມ່ນປະພຶດທຳຢູ່ກໍບໍ່ຖືຕົວ
ລູກໄປຈາກບ່ອນນີ້ແລ້ວຈົ່ງຄົບຜູ້ນັ້ນ
ເຊິ່ງມີປັນຍາເຮັດແຕ່ກຳອັນບໍລິສຸດເທີ້ນ

[໘໓]　　ຄົນທີ່ມີຈິດກັບກອກເໝືອນລີງ
ຮັກງ່າຍໜ່າຍໄວດັ່ງຜ້າທີ່ຍ້ອມດ້ວຍຂີ້ມິ້ນ
ລູກຮັກ ເຖິງແມ່ນວ່າພື້ນຊົມພູທະວີບທັງໝົດຈະຂາດມະນຸດ
ລູກກໍຢ່າຄົບຄົນເຊັ່ນນັ້ນເລີຍ

[໘໔]　　ຄົນທີ່ມີຈິດໂກດເໝືອນອະສໍຣະພິດ
ລູກຈົ່ງເວັ້ນໃຫ້ຫ່າງໄກ ເໝືອນຄົນເວັ້ນຫົນທາງໃຫຍ່ທີ່ເປິະເປື້ອນ
ແລະເໝືອນຄົນຂັບຂີ່ຍານພາຫະນະເວັ້ນຫົນທາງທີ່ບໍ່ຮາບພຽງ

[໘໕]　　ລູກຮັກ ເມື່ອເຂົ້າໄປຄົບຫາຄົນພານຢ່າງເປັນມິດ
ກໍຈະເພີ່ມພູນແຕ່ຄວາມຈິບຫາຍ
ລູກຢ່າສະມາຄົມກັບຄົນພານເລີຍ
ຂຶ້ນຊື່ວ່າການຢູ່ຮ່ວມກັບຄົນພານເປັນເໝືອນການຢູ່ຮ່ວມກັບສັດຕູທຸກເມື່ອ

[໘໖]　　ລູກຮັກ ດັ່ງນັ້ນພໍ່ຈຶ່ງຂໍຮ້ອງລູກ
ລູກຈົ່ງເຮັດຕາມຄຳຂອງພໍ່

ລູກຢ່າສະມາຄົມກັບຄົນພານເລີຍ
ຍ້ອນການສະມາຄົມກັບຄົນພານທັງຫຼາຍເປັນທຸກ

**ທະລິດທະຣາຄະຊາດົກທີ ໙ ຈົບ**

## ໑໐. ສະມຸກຄະຊາດົກ (໔໓໖)
## ວ່າດ້ວຍຍິງໃນຜະອົບແກ້ວ

(ພຣະໂພທິສັດກ່າວກັບຍັກວ່າ)

[໗໗] ທ່ານຜູ້ຈະເລີນທັງຫຼາຍ ພວກທ່ານທັງ ໓ ຄົນມາຈາກບ່ອນໃດນໍ
ພວກທ່ານພາກັນມາດີແລ້ວ ເຊີນນັ່ງທີ່ອາສະນະເທີ້ນ
ທ່ານຜູ້ຈະເລີນທັງຫຼາຍ
ພວກທ່ານສຸກສະບາຍບໍ່ມີໂຣກໄພບຽດບຽນບໍ
ນານມາແລ້ວພວກທ່ານຫາກໍ່ຈະມາຫາໃນທີ່ນີ້

(ຍັກກ່າວວ່າ)

[໗໘] ມື້ນີ້ ຂ້າພະເຈົ້າມາຮອດບ່ອນນີ້ພຽງຄົນດຽວ
ຂ້າພະເຈົ້າບໍ່ມີໃຜເປັນເພື່ອນເລີຍ
ທ່ານລືສີ ທ່ານກ່າວວ່າ ທ່ານຜູ້ຈະເລີນທັງຫຼາຍ
ພວກທ່ານທັງ ໓ ຄົນມາຈາກບ່ອນໃດນໍ?
ນັ້ນໝາຍເຖິງໃຜນໍ?

(ພຣະໂພທິສັດກ່າວວ່າ)

[໗໙] ທ່ານຄົນໜຶ່ງ ແລະພັນລະຍາສຸດທີ່ຮັກຂອງທ່ານ
ເຊິ່ງທ່ານເຊື່ອງໄວ້ໃນຜະອົບແກ້ວຂ້າງໃນ
ທ່ານຮັກສານາງໄວ້ໃນທ້ອງໃນການທຸກເມື່ອ
ນາງກຳລັງອະພິຣົມຢູ່ກັບວິທະຍາທອນຊື່ວາຍຸບຸດໃນທ້ອງນັ້ນ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໘໐] ຍັກນັ້ນ ຮູ້ສຶກເສົ້າເສຍໃຈ
ໄດ້ເປີດຜະອົບແກ້ວອອກມາ ໃນບ່ອນນັ້ນ

ໄດ້ເຫັນພັນລະຍາທັດຊົງດອກໄມ້ສວຍງາມ
ກຳລັງອະພິຣົມຢູ່ກັບວິທະຍາທອນຊື່ວາຍຸບຸດໃນຜະອົບນັ້ນ

(ຍັກກ່າວວ່າ)

[໙໑] ເຫດການນີ້ ທ່ານຜູ້ພໍ່າເພັງຕະບະຊັ້ນສູງໄດ້ເຫັນແຈ້ງຄັກແລ້ວວ່າ
ນໍຣະຊົນຜູ້ຕົກຢູ່ໃນອຳນາດຂອງສະຕີ
ເໝືອນນາງທີ່ເຮົາຮັກສາໄວ້ພາຍໃນທ້ອງນີ້ດັ່ງຊີວິດຂອງຕົນ
ຍັງກັບປະທຸດສະຮ້າຍເຮົາ ຊົມເຊີຍກັບຊາຍອື່ນ ນັບວ່າເປັນຄົນຊົ່ວ

[໙໒] ແມ່ນາງຜູ້ທີ່ເຮົາບຳຣຸງແລ້ວທັງກາງເວັນແລະກາງຄືນ
ເໝືອນໄຟທີ່ທ່ານຜູ້ພໍ່າເພັງຕະບະຢູ່ໃນປ່າບຳເລີຢູ່
ນາງລະເມີດທຳ ກັບປະພຶດອະທຳ
ເຮົາບໍ່ຄວນທຳຄວາມເຊີຍຊິດກັບຍິງທັງຫຼາຍເລີຍ

[໙໓] ເຮົາເຂົ້າໃຈຍິງຊົ່ວຜູ້ບໍ່ສັງລວມຢູ່ກາງຕົວເຮົາວ່າ
ຍິງນີ້ເປັນຂອງເຮົາມັນລະເມີດທຳ ກັບປະພຶດອະທຳ
ເຮົາບໍ່ຄວນທຳຄວາມເຊີຍຊິດກັບຍິງທັງຫຼາຍເລີຍ

[໙໔] ຈະໄວ້ໃຈໄດ້ແນວໃດວ່າ ເຮົາຄຸ້ມຄອງໄວ້ໄດ້ດີ
ເພາະພວກຍິງຫຼາຍໃຈ ບໍ່ມີການຮັກສາໄວ້ໄດ້ເລີຍ
ຍິງເຫຼົ່ານີ້ເໝືອນກັບເຫວເມືອງບາດານ
ຊາຍທີ່ມົວເມົາໃນຍິງເຫຼົ່ານີ້ຍ່ອມເຖິງຄວາມພິນາດ

[໙໕] ຍ້ອນເຫດນັ້ນແລ ຊາຍເຫຼົ່າໃດສະລັດມາຕຸຄາມຫ່າງວໄປໄດ້
ຊາຍເຫຼົ່ານັ້ນມີຄວາມສຸກ ປາສະຈາກຄວາມເສົ້າໂສກ
ຜູ້ປາຖະໜາຄວາມກະເສມອັນສູງສຸດ
ບໍ່ເພິ່ງທຳຄວາມເຊີຍຊິດກັບມາຕຸຄາມເລີຍ

**ສະມຸກຄະຊາດົກທີ ໑໐ ຈົບ**

## ໑໑. ປູຕິມັງສະຊາດົກ (໔໓໗)
## ວ່າດ້ວຍໝາຈອກຊື່ປູຕິມັງສະ

(ໝາຈອກຕົວເມຍ ກ່າວກັບແມ່ແບ້ວ່າ)

[໙໖] ນີ້ເພື່ອນຍິງ ການແນມເບິ່ງຂອງໝາຈອກປູຕິມັງສະ
ເຮົາບໍ່ພໍໃຈເລີຍ ຄວນລະເວັ້ນໃຫ້ຫ່າງໄກຈາກສະຫາຍເຊັ່ນນີ້

(ໝາຈອກຕົວຜູ້ກ່າວວ່າ)

[໙໗] ແມ່ເວນີນີ້ບ້າ ຍົກຍ້ອງເພື່ອນຍິງຕໍ່ໜ້າຜົວ
ຍ່ອມຊຶບເຊົາເຖິງແມ່ແບ້ຕົວທີ່ມາແລ້ວກັບໄປ

(ໝາຈອກຕົວເມຍ ກ່າວວ່າ)

[໙໘] ນີ້ສະຫາຍ ທ່ານຕິບ້າ ໂງ່ຈ້ຳຂາດປັນຍາພິຈາລະນາ
ເຮັດລວງວ່າຕາຍ ແຕ່ກັບຫັນໜ້າແນມເບິ່ງ ໂດຍການອັນບໍ່ສົມຄວນ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໙໙] ບັນດິດບໍ່ຄວນຈະເພ່ງແນມໃນການອັນບໍ່ສົມຄວນ
ຄວນຈະເພ່ງແນມໃນການອັນສົມຄວນ
ຜູ້ທີ່ເພ່ງແນມໃນການອັນບໍ່ສົມຄວນຍ່ອມຊຶບເຊົາ
ເໝືອນໝາຈອກຊື່ປູຕິມັງສະ

(ໝາຈອກຕົວເມຍກ່າວ ກັບແມ່ແບ້ວ່າ)

[໑໐໐] ເພື່ອນຍິງ ຂໍໃຫ້ຮັກຂອງເຮົາຈົ່ງມີຄືເກົ່າເທີ້ນ
ຂໍທ່ານຈົ່ງໃຫ້ຄວາມຊື່ນໃຈແກ່ເຮົາ
ຜົວຂອງເຮົາກັບຟື້ນຄືນຊີບຂຶ້ນມາແລ້ວ
ທ່ານຄວນໄປຢ້ຽມຢາມຖາມທຸກສຸກເທີ້ນ

(ແມ່ແບ້ກ່າວວ່າ)

[໑໐໑] ເພື່ອນຍິງ ຂໍຄວາມຮັກຂອງທ່ານຈົ່ງມີຄືເກົ່າເທີ້ນ
ເຮົາຈະໃຫ້ຄວາມຊື່ນໃຈແກ່ທ່ານ ເຮົາຈະໄປພ້ອມກັບບໍລິວານຈຳນວນຫຼາຍ
ຂໍທ່ານຈົ່ງເຮັດອາຫານໄວ້ເທີ້ນ

(ໝາຈອກຕົວເມຍ ກ່າວວ່າ)

[໑໐໒] ບໍລິວານຂອງທ່ານທີ່ເຮົາຈະເຮັດອາຫານໃຫ້ກິນ
ເປັນສັດຊະນິດໃດ ທັງໝົດມີຊື່ວ່າແນວໃດ

ເຮົາຖາມເຖິງສັດເຫຼົ່ານັ້ນແລ້ວ
ຂໍທ່ານຈົ່ງບອກ

(ແມ່ແບ້ກ່າວວ່າ)

[໑໐໓] ບໍລິວານຂອງເຮົາເປັນເຊັ່ນນີ້ ຄື
ໝາຊື່ມາລິຍະ ຈະຕຸຣັກຂະ ປິງຄິຍະ ແລະຊໍາພຸກະ
ທ່ານຈົ່ງເຮັດອາຫານເພື່ອພວກເຂົາ

(ໝາຈອກຕົວເມຍກ່າວວ່າ)

[໑໐໔] ເມື່ອທ່ານອອກຈາກຖໍ້າໄປ
ແມ່ນສິ່ງຂອງກໍຈະສູນຫາຍ
ເຮົາຈະແຈ້ງຂ່າວຄວາມສຸກສະບາຍແກ່ເພື່ອນເອງ
ທ່ານຢູ່ບ່ອນນີ້ແລ ຢ່າໄປເລີຍ

**ປູຕິມັງສະຊາດົກທີ ໑໑ ຈົບ**

## ໑໘. ທັດທະຣະຊາດົກ (໔໓໗)
## ວ່າດ້ວຍນິກກະທາ

(ຣຸກຂະເທວະດາກ່າວກັບເຫ້ຍວ່າ)

[໑໐໕] ຄົນທີ່ເຈົ້າໃຫ້ເຂົ້າທຸງກິນນັ້ນແລ
ໄດ້ກິນລູກນ້ອຍທັງຫຼາຍຂອງເຈົ້າເຊິ່ງບໍ່ມີຄວາມຜິດ
ເຈົ້າຈົ່ງກັດມັນໃຫ້ຈົມແຂ້ວ ຢ່າປ່ອຍໃຫ້ມັນມີຊີວິດຢູ່

(ແມ່ເຫ້ຍກ່າວວ່າ)

[໑໐໖] ຄົນທີ່ເຮັດວຽກຫຍາບຊ້າຫຼາຍເປັນຄົນແປດເປື້ອນ
ເໝືອນຜ້ານຸ່ງຂອງຍິງລ້ຽງເດັກ
ຂ້າພະເຈົ້າຍັງເບິ່ງບໍ່ເຫັນສ່ວນທີ່ຈະກັດມັນໃຫ້ຈົມແຂ້ວເລີຍ

[໑໐໗] ຄົນອະກະຕັນຍູ ຖ້າຈັບຜິດຢູ່ເປັນນິດ
ເຖິງຈະໃຫ້ແຜ່ນດິນທັງໝົດ ກໍເຮັດໃຫ້ເຂົາພໍໃຈບໍ່ໄດ້

(ພະຍາຣາດຊະສີຖາມພະຍາເສືອໂຄ່ງວ່າ)

[໑໐๗] ນີ້ພໍ່ສຸພາຫຸ ເປັນຫຍັງບໍ ທ່ານຈຶ່ງຟ້າວກັບມາພ້ອມກັບມານົບ
ທ່ານມີວຽກສຳຄັນໃນບ່ອນນີ້ບໍ
ເຮົາຖາມແລ້ວ ທ່ານຈົ່ງບອກເລື້ອງນັ້ນ

(ພະຍາເສືອໂຄ່ງຕອບວ່າ)

[໑໐໙] ມື້ນີ້ ເຮົາສົງໄສການຂ້ານົກກະທາ⁹
ເພື່ອນຂອງທ່ານເຊິ່ງເປັນສັດດີ
ເຮົາໄດ້ຟັງໜ້າທີ່ວຽກງານຂອງຊາຍຜູ້ນີ້
ຈຶ່ງບໍ່ແນ່ໃຈວ່າ ນົກກະທາຈະມີຄວາມສຸກໃນມື້ນີ້

(ພະຍາຣາດຊະສີຖາມວ່າ)

[໑໑໐] ໂດຍການປະມວນຄວາມປະພຶດຂອງຊາຍຄົນນີ້
ຊາຍຄົນນີ້ມີໜ້າທີ່ວຽກງານອັນໃດ
ຫຼືການຍອມຮັບອັນໃດຂອງຊາຍຄົນນີ້ທີ່ທ່ານຟັງມາ
ຈຶ່ງສົງໄສວ່າ ນົກກະທາຖືກຊາຍຄົນນີ້ຂ້າ

(ພະຍາເສືອໂຄ່ງຕອບວ່າ)

[໑໑໑] ການຄ້າຂາຍຕາມແບບແຜນຂອງຊາວເມືອງກາລິງຄະ
ຊາຍຄົນນີ້ກໍໄດ້ດຳເນີນມາແລ້ວ
ຫົນທາງທີ່ຕ້ອງໃຊ້ຫວາຍກິນເປັນອາຫານ ຄົນຜູ້ນີ້ກໍຜ່ານມາແລ້ວ
ແມ່ນການຮົບດ້ວຍກະບອງພ້ອມທັງບ້ວງບາດກາງໂຮງມະໂຫລະສົບ
ຊາຍຄົນນີ້ກໍໄດ້ສະແດງມາແລ້ວກັບນັກຟ້ອນທັງຫຼາຍ

[໑໑໒] ນົກທັງຫຼາຍເຂົາກໍຈັບມາແລ້ວ
ງານຕວງເຂົ້າເຂົາກໍເຮັດມາແລ້ວ
ການພະນັນເຂົາກໍຊະນະມາແລ້ວ
ເຂົາລະເມີດການສັງລວມສິນ
ເລືອດທີ່ອອກຕັ້ງເຄິ່ງຄືນເຂົາກໍຄັດໃຫ້ຢຸດໄດ້
ມືຖືກໄຟໄໝ້ຍ້ອນການຮັບກ້ອນເຂົ້າທີ່ຮ້ອນ

[໑໑໓] ໂດຍປະມວນຄວາມປະພຶດຂອງຊາຍຄົນນີ້ແລ້ວ
ໜ້າທີ່ວຽກງານເຫຼົ່ານັ້ນເປັນຂອງເຂົາ ທີ່ເຮົາຟັງມາ
ດັ່ງຈະເຫັນໄດ້ ຂົນນົກກະທາກະຈຸກນີ້ຍັງຜາກົດຢູ່
ງົວທັງຫຼາຍເຂົາຍັງຂ້າໄດ້
ເປັນຫຍັງນົກກະທາເຂົາຈະຂ້າບໍ່ໄດ້ນໍ

**ທັດທະຣະຊາດົກທີ ໑໒ ຈົບ**

## ລວມຊາດົກທີ່ມີໃນນິບາດນີ້ ຄື

໑. ຄິຊະນະຊາດົກ
໒. ໂກສຳພິຍະຊາດົກ
໓. ມະຫາສຸວະຣາຊະຊາດົກ
໔. ຈູລະສຸວະກະຣາຊະຊາດົກ
໕. ຫະຣິຕະຈະຊາດົກ
໖. ປະທະກຸສະລະມານະວະຊາດົກ
໗. ໂລມະສະກັດສະປະຊາດົກ
໘. ຈັກກະວາກະຊາດົກ
໙. ຫະລິດທະຣາຄະຊາດົກ
໑໐. ສະມຸກຄະຊາດົກ
໑໑. ປູຕິມັງສະຊາດົກ
໑໒. ທັດທະຣະຊາດົກ

**ນະວະກະນິບາດ ຈົບ**

# ໑໐. ທະສະກະນິບາດ

## ໑. ຈະຕຸທະວາຣະຊາດົກ (໔໓໗)
## ວ່າດ້ວຍເມືອງມີ ໔ ປະຕູ

(ນາຍມິດຕະວິນທະກະຖາມຣຸກຂະເທວະດາໂພທິສັດວ່າ)

[໑] ເມືອງນີ້ມີ ໔ ປະຕູ ມີກຳແພງເຫຼັກໝັ້ນຄົງ
ຂ້າພະເຈົ້າໄດ້ເຮັດກຳຊົ່ວອັນໃດ ຈຶ່ງຖືກກັກຂັງໄວ້

[໒] ປະຕູທຸກບານໄດ້ຖືກປິດໄວ້ ຂ້າພະເຈົ້າຖືກຂັງເໝືອນກັບນົກ
ເຫບຜູ້ຄວນບູຊາ ເຫດອັນໃດນໍ ຂ້າພະເຈົ້າຈຶ່ງຖືກກົງຈັກບົດປັ່ນຢູ່

(ຣຸກຂະເທວະດາຕອບວ່າ)

[໓] ນີ້ສະຫາຍ ທ່ານໄດ້ຊັບເຖິງ ໑໘໐,໐໐໐ ແລ້ວ
ກໍບໍ່ເຮັດນໍາຄໍາຂອງພວກຍາດຜູ້ອະນຸເຄາະ

[໔] ທ່ານໄດ້ແລ່ນເຮືອອອກໄປສູ່ສະມຸດສາຄອນ
ເຊິ່ງເຮັດໃຫ້ເຮືອໂລດເຕັ້ນໄດ້ ອັນມີຄວາມສໍາເລັດໜ້ອຍ
ທ່ານເມື່ອມີຄວາມປາຖະໜາຫຼາຍເກີນໄປ
ໄດ້ຄອບຄອງນາຣີ ໔ ນາງ ບໍ່ພໍໃຈນາງທັ້ງ ໔
ໄດ້ຄອບຄອງນາຣີ ໘ ນາງ ບໍ່ພໍໃຈນາງທັງ ໘

[໕] ໄດ້ຄອບຄອງນາຣີ ໑໖ ນາງ ບໍ່ພໍໃຈນາງທັງ ໑໖
ໄດ້ຄອບຄອງນາຣີ ໓໒ ນາງ ບໍ່ພໍໃຈນາງທັງ ໓໒
ຈຶ່ງໄດ້ປະສົບກົງຈັກ
ກົງຈັກຈຶ່ງພັດຜັນຢູ່ທີ່ຫົວຂອງທ່ານ
ຜູ້ຖືກຄວາມປາຖະໜາຫຼາຍເກີນໄປກໍາຈັດແລ້ວ

[໖] ອັນຄວາມຢາກທີ່ແຜ່ຊ່ານໄປ ກວ້າງຂວາງຫຼາຍ ໃຫ້ເຕັມໄດ້ຍາກ
ຄົນເຫຼົ່າໃດກໍາໜັດຕາມຄວາມຢາກນັ້ນ
ຄົນເຫຼົ່ານັ້ນຕ້ອງເປັນຜູ້ທູນກົງຈັກໄວ້

[໗] ຄົນເຫຼົ່າໃດລະຖິ້ມຊັບຈໍານວນຫຼາຍ
ບໍ່ພິຈາລະນາຫົນທາງທີ່ຍັງບໍ່ໄດ້ພິຈາຣະນາ
ຄົນເຫຼົ່ານັ້ນຕ້ອງເປັນຜູ້ແບກກົງຈັກໄວ້

[໘] ບັນດິດເພິ່ງພິຈາລະນາວຽກງານແລະໂພຄະອັນໄພບູນ
ເມື່ອຢາກໄດ້ກໍຢ່າເພິ່ງສ້ອງເສບສິ່ງທີ່ປະກອບດ້ວຍຄວາມຈິບຫາຍ
ເພິ່ງເຮັດຕາມຄໍາບອກກ່າວຂອງຜູ້ອະນຸເຄາະທັງຫຼາຍ
ບຸກຄົນເຊັ່ນນັ້ນກົງຈັກກໍຈະເຮັດຫຍັງບໍ່ໄດ້

(ນາຍມິດຕະວິນທະກະຖາມວ່າ)

[໙] ເທບຜູ້ຄວນບູຊາ ກົງຈັກເທິງຫົວຂອງຂ້າພະເຈົ້າ
ຈະຢູ່ດົນນານເທົ່າໃດນໍ ຈັກພັນປີ?
ຂ້າພະເຈົ້າຖາມແລ້ວ ຂໍທ່ານຈົ່ງບອກເລື້ອງນັ້ນແກ່ຂ້າພະເຈົ້າ

(ຣຸກຂະເທວະດາຕອບວ່າ)

[๑๐] ມິດຕະວິນທະກະ ທ່ານຈົ່ງຟັງຂ້າພະເຈົ້າ
ເຈົ້າຕ້ອງຣະນຶກເຖິງໃຫ້ຫຼາຍ ຄຳນຶງໄວ້ໃຫ້ດີ
ກົງຈັກຈະຍັງຄົງໝຸນຢູ່ເທິງຫົວຂອງເຈົ້າ
ເມື່ອເຈົ້າມີຊີວິດຢູ່ ກໍຈະບໍ່ພົ້ນຈາກມັນໄດ້ດອກ

**ຈະຕຸທະວາຣະຊາດົກທີ ໑ ຈົບ**

## ๘. ກັນຫະຊາດົກ (๔๔๐)
## ວ່າດ້ວຍກັນຫະລືສີ

(ທ້າວສັກກະຕັດກັບລືສີກັນຫະວ່າ)

[๑๑] ຊາຍຄົນນີ້ຜິວດຳນໍ ບໍຣິໂພກອາຫານສີດຳ
ຢູ່ໃນພູມີປະເທດສີດຳ ເຮົາບໍ່ພໍໃຈເລີຍ

(ລືສີກັນຫະກ່າວວ່າ)

[๑๘] ທ້າວສຸຊຳບໍດີສັກກະເທວະຣາດ ຍ້ອນຜິວບໍ່ນັບວ່າເປັນຄົນດຳ
ຍ້ອນພາມມີຄວາມດີເປັນແກ່ນໃນພາຍໃນ
ຜູ້ທີ່ມີກຳຊົ່ວນັ້ນແລ ນັບວ່າເປັນຄົນດຳ

(ທ້າວສັກກະຕັດວ່າ)

[๑๓] ທ່ານພາມ ຍ້ອນຄຳເວົ້າທີ່ທ່ານເຈຣະຈານັ້ນ
ມ່ວນ ເໝາະສົມ ເປັນສຸພາສິດ
ຂ້າພະເຈົ້າຈະໃຫ້ພອນແກ່ທ່ານຕາມທີ່ໃຈຂອງທ່ານປາຖະໜາ

(ລືສີກັນຫະກ່າວວ່າ)

[๑๔] ທ້າວສັກກະຜູ້ເປັນໃຫຍ່ແຫ່ງພູດທັງປວງ
ຫາກພຣະອົງຈະປະທານພອນແກ່ອາດຕະມາ
ອາດຕະມາຫວັງສະຍ້ອນຄວາມປະພຶດຂອງຕົນ ຄື ຢ່າມີຄວາມໂກດ
ຢ່າມີໂທສະ ຢ່າມີຄວາມໂລບ ແລະຢ່າມີຄວາມສະເນ່ຫາ
ຂໍພຣະອົງຊົງປະທານພອນທັງ ๔ ປະການເຫຼົ່ານີ້ແກ່ອາດຕະມາເທີ້ນ

(ທ້າວສັກກະຕັດວ່າ)

[໑໕] ພາມ ທ່ານເຫັນໂທດອັນໃດໃນຄວາມໂກດ
ໃນໂທສະ ໃນຄວາມໂລບ ຫຼືໃນຄວາມສະເນ່ຫາ
ຂ້າພະເຈົ້າຖາມແລ້ວຂໍທ່ານຈົ່ງບອກແກ່ຂ້າພະເຈົ້າ

(ລິສິກັນທະກ່າວວ່າ)

[໑໖] ຄວາມໂກດນັ້ນເກີດຈາກຄວາມບໍ່ອົດທົນ
ເຖິງຈະໜ້ອຍ ກໍຈະຫຼາຍໄດ້
ຕໍ່ໄປກໍຈະເພີ່ມພູນຍິ່ງຂຶ້ນ ເປັນຄວາມຂັດຂ້ອງໃຈ
ມີຄວາມຄັບແຄ້ນໃຈຫຼວງຫຼາຍ
ເພາະສະນັ້ນ ອາດຕະມາຈຶ່ງບໍ່ມັກຄວາມໂກດ

[໑໗] ຄົນຖືກໂທສະຄອບງຳມີວາຈາຫຍາບຄາຍ
ຕໍ່ໄປກໍກຳໝັດຕົບຕີກັນ ໃຊ້ທ່ອນໄມ້ປະຫານກັນ
ທີ່ສຸດກໍຈະໃຊ້ອາວຸດປະຫັດປະຫານກັນ
ໂທສະມີຄວາມໂກດເປັນສະມຸດຖານ
ເພາະສະນັ້ນ ອາດຕະມາຈຶ່ງບໍ່ມັກໂທສະ

[໑໘] ການປຸ້ນຂ້າຊາວບ້ານ ການຈີ້ຂົ່ມຂູ່ເອົາຊັບ ການຄົດໂກງ
ແລະການຫຼອກລວງຍ່ອມຜາກົດມີຢູ່ໃນບຸກຄົນຜູ້ມີຄວາມໂລບ
ເພາະສະນັ້ນ ອາດຕະມາຈຶ່ງບໍ່ມັກຄວາມໂລບ

[໑໙] ຄວາມຜູກພັນທີ່ຖືກຄວາມສະເນ່ຫາຮ້ອຍຮັດໄວ້ອັນເກີດຈາກໃຈ
ນອນເນື່ອງຢູ່ຢ່າງໜຽວແໜ້ນ ຍ່ອມເຮັດໃຫ້ເດືອດຮ້ອນບໍ່ສິ້ນສຸດ
ເພາະສະນັ້ນ ອາດຕະມາຈຶ່ງບໍ່ມັກຄວາມສະເນ່ຫາ

(ທ້າວສັກກະຕັດວ່າ)

[໒໐] ພາມ ເພາະຄຳເວົ້າທີ່ທ່ານເຈຣະຈານັ້ນ
ມ່ວນ ເໝາະສົມ ເປັນສຸພາສິດ
ຂ້າພະເຈົ້າຈະໃຫ້ພອນແກ່ທ່ານຕາມທີ່ໃຈຂອງທ່ານປາຖະໜາ

(ລິສິກັນທະກ່າວວ່າ)

[໒໑] ທ້າວສັກກະຜູ້ເປັນໃຫຍ່ແຫ່ງພູດທັງປວງ

ຫາກພຣະອົງຈະປະທານພອນແກ່ອາດຕະມາ
ອາດຕະມາເມື່ອຢູ່ໃນປ່າ ກໍຢູ່ພຽງຜູ້ດຽວເປັນນິດ
ອາພາດທັງຫຼາຍທີ່ຮ້າຍກາດເຊິ່ງທຳອັນຕະລາຍໄດ້ຂໍຢ່າໄດ້ເກີດຂຶ້ນເລີຍ

(ທ້າວສັກກະຕັດວ່າ)

[໔໘] ພາມ ຍ້ອນຄຳເວົ້າທີ່ທ່ານເຈຣະຈານັ້ນ
ມ່ວນ ເໝາະສົມ ເປັນສຸພາສິດ
ຂ້າພະເຈົ້າຈະໃຫ້ພອນແກ່ທ່ານຕາມທີ່ໃຈຂອງທ່ານປາຖະໜາ

(ລືສີກັນຫະກ່າວວ່າ)

[໔໓] ທ້າວສັກກະຜູ້ເປັນໃຫຍ່ແຫ່ງພູດທັງປວງ
ຫາກພຣະອົງຈະປະທານພອນ ແກ່ອາດຕະມາ
ໃຈກໍຕາມ ກາຍກໍຕາມ
ຂໍຢ່າໄດ້ເຂົ້າໄປກະທົບກະທັ່ງໃຜ ໆ ໃນການໃດ ໆ ເລີຍ
ຍ້ອນການກະທຳຂອງອາດຕະມາເລີຍ ອາດຕະມາປາຖະໜາພອນດັ່ງນີ້

**ກັນຫະຊາດົກທີ ໘ ຈົບ**

## ໓. ຈະຕຸໂປສະຖິຍະຊາດົກ (໔໔໑)
## ວ່າດ້ວຍບຸກຄົນທັງ ໔ ຮັກສາອຸໂປສົດ

(ວະຣຸນະນາກຄະຣາດກ່າວວ່າ)

[໔໔] ນໍຣະຊົນໃດບໍ່ທຳຄວາມໂກດໃນບຸກຄົນທີ່ຄວນໂກດ
ແລະບໍ່ໂກດໃນການໃດ ໆ
ນໍຣະຊົນນັ້ນເປັນສັດຕະບຸຣຸດ
ສັດຕະບຸຣຸດນັ້ນແມ່ນຈະໂກດກໍບໍ່ເປີດເຜີຍຄວາມໂກດ
ນໍຣະຊົນນັ້ນບັນດິດທັງຫຼາຍກ່າວວ່າ ເປັນສະມະນະໃນໂລກ

(ພະຍາຄຸດກ່າວວ່າ)

[໔໕] ນໍຣະຊົນໃດມີທ້ອງບົກຢູ່ ຍັງອົດທົນຕໍ່ຄວາມຫິວໄດ້
ເຝິກຕົນໄດ້ ມີຕະບະ ດື່ມນ້ຳແລະບໍຣິໂພກອາຫານພໍປະມານ

ບໍ່ທຳຄວາມຊົ່ວຍ້ອນເຫດແຫ່ງອາຫານ
ນໍຣະຊົນນັ້ນບັນດິດທັງຫຼາຍກ່າວວວ່າ ເປັນສະມະນະໃນໂລກ

(ທ້າວສັກກະຕັດວ່າ)

[໘໕] ນໍຣະຊົນໃດລະການຫຼິ້ນແລະຄວາມຍິນດີໃນກາມທັງປວງໄດ້
ບໍ່ເວົ້າໂລເລຮອດອັນໃດ ໆ ໃນໂລກ
ງົດເວັ້ນຈາກການປະດັບຕົບແຕ່ງຮ່າງກາຍແລະຈາກເມຖຸນທຳ
ນໍຣະຊົນນັ້ນບັນດິດທັງຫຼາຍກ່າວວ່າ ເປັນສະມະນະໃນໂລກ

(ພຣະເຈົ້າທະນັນໄຊໄດ້ສະດັບດັ່ງນັ້ນ ຈຶ່ງຕັດວ່າ)

[໘໖] ອັນໜຶ່ງ ນໍຣະຊົນໃດສະລະຄວາມຫວງແຫນແລະໂລພະທຳທັງປວງໄດ້
ດ້ວຍປັນຍາເຄື່ອງກຳນົດຮູ້
ນໍຣະຊົນນັ້ນແລຜູ້ເຝິກຕົນ ມີຄວາມໝັ້ນຄົງ
ບໍ່ຍຶດຖືສິ່ງໜຶ່ງສິ່ງໃດວ່າເປັນຂອງເຮົາ ໝົດຄວາມຫວັງ
ບັນດິດທັງຫຼາຍກ່າວວ່າ ເປັນສະມະນະໃນໂລກ

(ພຣະຣາຊາເຫຼົ່ານັ້ນທັງໝົດພາກັນຖາມວິທຸຣະບັນດິດໂພທິສັດວ່າ)

[໘໗] ພວກຂ້າພະເຈົ້າຂໍຖາມທ່ານຜູ້ມີປັນຍາບໍ່ຊາມ ຮູ້ສິ່ງທີ່ຄວນເຮັດ
ພວກຂ້າພະເຈົ້າເກີດມີການໂຕ້ແຍ້ງກັນໃນຄຳເວົ້າທັງຫຼາຍ
ໃນວັນນີ້ ຂໍທ່ານຈົ່ງຕັດຄວາມສົງໄສລັງເລໃຈໃຫ້ດ້ວຍ
ຈົ່ງຊ່ວຍຂ້າພະເຈົ້າທັງໝົດໃຫ້ຂ້າມພົ້ນຄວາມສົງໄສລັງເລໃຈນັ້ນສາ

(ວິທຸຣະບັນດິດໂພທິສັດຂາບທູນວ່າ)

[໘໘] ບັນດິດເຫຼົ່າໃດໄດ້ເຫັນເນື້ອຄວາມ
ບັນດິດເຫຼົ່ານັ້ນຈຶ່ງຈະກ່າວໄດ້ຢ່າງແຍບຄາຍໃນການນັ້ນ
ຂໍເດຊະພຣະອົງຜູ້ຈອມຊົນ ທ່ານຜູ້ສະຫຼາດທັງຫຼາຍ
ຈະແນະນຳເນື້ອຄວາມແຫ່ງຄຳເວົ້າທີ່ຍັງບໍ່ໄດ້ບອກກ່າວໄດ້ແນວໃດນໍ

[໙໐] ກໍພະຍານາກຄະຣາດກ່າວສັນເສີນເລື້ອງອັນໃດ
ພະຍາຄຸດບຸດຂອງນາງວິນຕາກ່າວສັນເສີນເລື້ອງອັນໃດ
ຣາຊາແຫ່ງຄົນທັນກ່າວສັນເສີນເລື້ອງອັນໃດ

ທາຊາແຫ່ງຊາວແຄວັນກຸຣຸຜູ້ປະເສີດກ່າວສັນເສີນເລື້ອງອັນໃດ

(ພຣະຣາຊາທັງ ໔ ພຣະອົງຕັດກັບວິທຸຣະບັນດິດໂພທິສັດວ່າ)

[໓໑] ພະຍານາກກ່າວສັນເສີນຂັນຕິ
ພະຍາຄຸດບຸດຂອງນາງວິນຕາກ່າວສັນເສີນຄວາມເປັນຜູ້ມີອາຫານໜ້ອຍ
ທາຊາແຫ່ງຄົນທັນກ່າວສັນເສີນການລະຄວາມອະພິຣົມ
ພຣະຣາຊາແຫ່ງຊາວແຄວັນກຸຣຸຜູ້ປະເສີດກ່າວສັນເສີນຄວາມບໍ່ກັງວົນ

(ວິທຸຣະບັນດິດໂພທິສັດຂາບທູນວ່າ)

[໓໔] ຄຳເຫຼົ່ານີ້ທັງໝົດເປັນສຸພາສິດ
ກໍໃນຄຳເຫຼົ່ານີ້ ຫາຄຳທີ່ເປັນທຸບພາສິດບໍ່ໄດ້ຈັກຂໍ້ດຽວ
ແລະຄຸນນະທຳທັງ ໔ ປະການນີ້ມີຢູ່ໃນນໍຣະຊົນໃດຢ່າງໝັ້ນຄົງ
ເໝືອນຢ່າງດື້ວກຳທີ່ສອດໃສ່ໄວ້ໃນດຸມກວງນ
ນໍຣະຊົນນັ້ນແລຜູ້ພຽບພ້ອມດ້ວຍທຳທັງ ໔ ປະການ
ບັນດິດທັງຫຼາຍກ່າວວ່າ ເປັນສະມະນະໃນໂລກ

(ພຣະຣາຊາທັງ ໔ ພຣະອົງຕັດວ່າ)

[໓໓] ທ່ານປະເສີດແທ້ນໍ ຍອດຢ້ຽມ ເປັນຜູ້ເຖິງທຳ
ຮູ້ທຳ ມີປັນຍາດີ ສາງບັນຫາໄດ້ດ້ວຍປັນຍາ
ເປັນນັກປາດ ກຳຈັດຄວາມສົງໄສລັງເລໃຈສາໄດ້
ເໝືອນນາຍຊ່າງງາຕັດງາຊ້າງດ້ວຍເລື່ອຍອັນຄົມ

[໓໔] ທ່ານຜູ້ເປັນນັກປາດ ຂ້າພະເຈົ້າພໍໃຈການແກ້ບັນຫາຂອງທ່ານ
ນີ້ເປັນຜ້າສີດອກອຸບົນ ຜຸດຜ່ອງ ເນື້ອລະອຽດເໝືອນຄວັນໄຟ
ຫາຄ່າບໍ່ໄດ້ ຂ້າພະເຈົ້າຂໍມອບໃຫ້ທ່ານເພື່ອບູຊາທຳ

[໓໕] ທ່ານຜູ້ເປັນນັກປາດ ຂ້າພະເຈົ້າພໍໃຈການແກ້ບັນຫາຂອງທ່ານ
ນີ້ເປັນພວງມາລາຄຳ ແຍ້ມບານ ມີກີບເຖິງ ໑໐໐ ກີບ
ມີເກສອນທີ່ປະດັບປະດາດ້ວຍຣັດຕະນະເຖິງ ໑,໐໐໐
ຂ້າພະເຈົ້າຂໍມອບໃຫ້ທ່ານເພື່ອບູຊາທຳ

[໓໖] ທ່ານຜູ້ເປັນນັກປາດ ຂ້າພະເຈົ້າພໍໃຈການແກ້ບັນຫາຂອງທ່ານ

ແກ້ວມະນີຫາຄ່າບໍ່ໄດ້ ສວຍງາມ ຜຸດຜ່ອງ
ເປັນເຄື່ອງປະດັບຄ້ອງຄໍຂອງຂ້າພະເຈົ້າ
ຂ້າພະເຈົ້າຂໍມອບໃຫ້ທ່ານເພື່ອບູຊາທຳ

[໓໗] ຂ້າພະເຈົ້າພໍໃຈການແກ້ບັນຫາຂອງທ່ານ ຂໍມອບງົວນົມ ງົວຜູ້
ແລະຊ້າງ ຢ່າງລະ ໑,໐໐໐ ໂຕ ລົດທຽມມ້າອາຊາໄນ ໑໐ ຄັນ
ແລະບ້ານສ່ວຍ ໑໖ ເຂດເຫຼົ່ານີ້ໃຫ້ແກ່ທ່ານເພື່ອບູຊາທຳ

(ພຣະບໍຣົມສາດສະດາຊົງປະມວນຊາດົກມາຕັດພຣະຄາຖາສຸດທ້າຍວ່າ)

[໓໘] ພະຍານາກໃນຄັ້ງນັ້ນ ຄື ພຣະສາລີບຸດ
ສ່ວນພະຍາຄຸດ ຄື ໂກລິຕະ ຣາຊາແຫ່ງຄົນທັນ ຄື ພຣະອະນຸຣຸດທະ
ພຣະຣາຊາ ຄື ພຣະອານົນຜູ້ເປັນບັນດິດ
ສ່ວນວິທຸຣະບັນດິດ ຄື ພຣະໂພທິສັດ
ທ່ານທັງຫຼາຍຈົ່ງຊົງຈຳຊາດົກໄວ້ແນວນີ້ແລ

**ຈະຕຸໂປສະຖິຍະຊາດົກທີ ໓ ຈົບ**

# ໔. ສັງຂະຊາດົກ (໔໔໘)
## ວ່າດ້ວຍສັງຂະພາມ

(ອຸປັດຖາກກ່າວກັບສັງຂະພາມວ່າ)

[໓໙] ທ່ານສັງຂະພາມ ທ່ານເປັນພະຫູສູດ
ທຳກໍໄດ້ຟັງມາແລ້ວ ສະມະນະພາມທ່ານກໍໄດ້ພົບມາແລ້ວ
ເມື່ອເປັນເຊັ່ນນັ້ນ
ທ່ານມາສະແດງອາການພ່ຳເພີ້ໃນຂະນະອັນບໍ່ສົມຄວນເລີຍ
ຄົນອື່ນນອກຈາກຂ້າພະເຈົ້າຈະມີໃຜເປັນທີ່ເປີກສາຂອງທ່ານນໍ

(ສັງຂະພາມກ່າວວ່າ)

[໔໐] ເທບທິດາຜູ້ມີໃບໜ້າງາມ ຮູບງາມ
ສວມໃສ່ເຄື່ອງປະດັບຄຳ
ເຊີນຖາດອາຫານຄຳ ມີສັດທາແລະຍິນດີບອກເຮົາວ່າ
ຂໍເຊີນທ່ານບໍຣິໂພກອາຫານເທີ້ນ
ເຮົາຕອບປະຕິເສດເທບທິດາຕົນນັ້ນ

(ອຸປັດຖາກກ່າວວ່າ)

[໔໑] ທ່ານພານ ຄັນພົບເຫັນເທບຜູ້ຄວນບູຊາເຊັ່ນນີ້
ເມື່ອຫວັງຄວາມສຸກ ກໍຄວນຈະໄຕ່ຖາມ
ທ່ານຈຶ່ງລຸກຂຶ້ນປະນົມມືຖາມເທບຜູ້ນັ້ນກົງ ໆ ວ່າ
ທ່ານເປັນເທບທິດາຫຼືຍິງມະນຸດກັນນໍ

(ສັງຂະພານຖາມເທບທິດາວ່າ)

[໔໒] ຍ້ອນທ່ານແນມເບິ່ງຂ້າພະເຈົ້າດ້ວຍເມດຕາ
ແລະຍັງບອກເຊີນຂ້າພະເຈົ້າວ່າບໍຣິໂພກພັດຕາຫານເທີ້ນ
ແມ່ນາງຜູ້ມີອານຸພາບຫຼາຍ
ຍ້ອນເຫດນັ້ນ ຂ້າພະເຈົ້າຂໍຖາມທ່ານວ່າ
ທ່ານເປັນເທບທິດາຫຼືຍິງມະນຸດກັນນໍ

(ເທບທິດາຕອບວ່າ)

[໔໓] ທ່ານສັງຂະພານ ຂ້າພະເຈົ້າເປັນເທບທິດາ ມີອານຸພາບ
ມາທ່າມກາງສະມຸດນີ້ ມີຄວາມອິດູ ບໍ່ມີຈິດປະທຸດສະຮ້າຍແຕ່ຢ່າງໃດ
ຂ້າພະເຈົ້າມາບ່ອນນີ້ກໍເພື່ອປະໂຫຍດແກ່ທ່ານນັ້ນເອງ
[໔໔] ທ່ານສັງຂະພານ ໃນມະຫາສະມຸດນີ້ ມີເຂົ້າ ນ້ຳ
ບ່ອນນອນ ບ່ອນນັ່ງ ແລະຍານນານາຊະນິດ
ຂ້າພະເຈົ້າຈະມອບໃຫ້ທ່ານທຸກຢ່າງຕາມທີ່ໃຈຂອງທ່ານປາຖະໜາ

(ສັງຂະພານກ່າວວ່າ)

[໔໕] ຂ້າພະເຈົ້າໄດ້ບູຊາແລະບວງສວງມາແລ້ວທຸກສິ່ງທຸກຢ່າງ
ແມ່ເທບທິດາຜູ້ມີເຮືອນຮ່າງງົດງາມ ມີສະໂພກພຶ່ງຜາຍ ມີຄິ້ວງາມ
ແອວບາງຮ່າງນ້ອຍ ທ່ານເປັນໃຫຍ່ແຫ່ງບຸນກຳທຸກຢ່າງຂອງຂ້າພະເຈົ້າ
ນີ້ເປັນຜົນແຫ່ງກຳອັນໃດຂອງຂ້າພະເຈົ້ານໍ

(ເທບທິດາຕອບວ່າ)

[໔໖] ທ່ານສັງຂະພານ ທ່ານໃຫ້ພິກຂຸອົງໜຶ່ງຜູ້ຢ່າງແຢ່ງແຍ້
ກະຫາຍ ລຳບາກ ໃນທົ່ນທາງທີ່ຮ້ອນໃສ່ເກີບ ຖວາຍ
ທັກຂິນານັ້ນໃຫ້ສົມບັດທີ່ໜ້າປາຖະໜາແກ່ທ່ານໃນວັນນີ້

(ສັງຂະພານກ່າວວ່າ)

[໔໗] ຂໍຈົ່ງເນຣະມິດເຮືອທີ່ເຮັດດ້ວຍໄມ້ແປ້ນ
ບໍ່ຮົ່ວ ໃຊ້ໃບຕະໄຄ່ນ້ຳເປັນໃບເຮືອ
ຍ້ອນໃນກາງທະເລນີ້ບໍ່ແມ່ນພາກພື້ນແຫ່ງຍານອື່ນ
ຊ່ອຍສົ່ງຂ້າພະເຈົ້າໃຫ້ເຖິງເມືອງໂມລີນີໃນວັນນີ້ເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໔໘] ເທບທິດານັ້ນພໍໃຈ ຍິນດີປີດາ
ໄດ້ເນຣະມິດເຮືອອັນງົດງາມ ໃນບ່ອນນັ້ນ ພາສັງຂະພານ
ພ້ອມທັງອຸປັດຖາກຊາຍນຳໄປສົ່ງເຖິງເມືອງອັນໜ້າອອນຊອນ

**ສັງຂະຊາດົກທີ ໔ ຈົບ**

## ໕. ຈູລະໂພທິຊາດົກ (໔໔໓)
## ວ່າດ້ວຍຈູລະໂພທິກຸມານ

(ພຣະຣາຊາຕັດຖາມພຣະໂພທິສັດວ່າ)

[໔໙] ພາມ ຖ້າຈະເພິ່ງມີຄົນມາພານາງປະຣິພາຊິກາຂອງທ່ານ
ຜູ້ມີດວງຕາງາມ ຍິ້ມແຍ້ມຮ່າເຣີງໜ້າຮັກນີ້ໄປໂດຍພະລະການ
ທ່ານຈະເຮັດແນວໃດນໍ?

(ພຣະໂພທິສັດຕອບວ່າ)

[໕໐] ຖ້າອາດຕະມາເກີດຄວາມໂກດຂຶ້ນ
ຄວາມໂກດກໍຈະບໍ່ເພິ່ງເສື່ອມຄາຍ
ຈະບໍ່ເສື່ອມຄາຍຕະຫຼອດຊີວິດຂອງອາດຕະມາ
ອາດຕະມາຈະຫ້າມຄວາມໂກດສາໂດຍທັນທີ
ເໝືອນຝົນຫ່າໃຫຍ່ຣະງັບຝຸ່ນລະອອງ

(ພຣະຣາຊາຕັດວ່າ)

[໕໑] ວັນກ່ອນ ທ່ານນັ້ນກ່າວອວດອ້າງແນວໃດນໍ
ວັນນີ້ເບິ່ງຄືມີກຳລັງ ຈຶ່ງເຮັດເປັນນັ່ງນິ່ງຫຍິບຜ້າຫົ່ມຢູ່ໃນເວລານີ້

(ພຣະໂພທິສັດທູນຕອບວ່າ)

[໕໘] ອາດຕະມາເກີດຄວາມໂກດຂຶ້ນແລ້ວ
ຄວາມໂກດບໍ່ເສື່ອມຄາຍ
ຈະບໍ່ເສື່ອມຄາຍຕະຫຼອດຊີວິດຂອງອາດຕະມາ
ອາດຕະມາໄດ້ຫ້າມຄວາມໂກດສາແລ້ວໂດຍທັນທີ
ເໝືອນຝົນທ່າໃຫຍ່ຣະງັບຝຸ່ນລະອອງ

(ພຣະຣາຊາຕັດວ່າ)

[໕໙] ເປັນຫຍັງ ຄວາມໂກດທີ່ເກີດຂຶ້ນແລ້ວແກ່ທ່ານຈຶ່ງບໍ່ເສື່ອມຄາຍ
ເປັນຫຍັງ ຄວາມໂກດຈຶ່ງບໍ່ເສື່ອມຄາຍຕະຫຼອດຊີວິດຂອງທ່ານ
ເຫດໃດ ທ່ານຈຶ່ງຫ້າມຄວາມໂກດໄດ້ເໝືອນຝົນທ່າໃຫຍ່ຣະງັບຝຸ່ນລະອອງ

(ພຣະໂພທິສັດທູນວ່າ)

[໕໔] ເມື່ອຄວາມໂກດເກີດຂຶ້ນຍ່ອມເບິ່ງບໍ່ເຫັນ
ເມື່ອບໍ່ເກີດຍ່ອມເບິ່ງເຫັນໄດ້ດີ
ຄວາມໂກດນັ້ນເກີດຂຶ້ນແລ້ວແກ່ອາດຕະມາ ຈຶ່ງບໍ່ເສື່ອມຄາຍ
ຍ້ອນຄວາມໂກດເປັນອາລົມຂອງຄົນໂງ່

[໕໕] ຄວາມໂກດທີ່ເກີດຂຶ້ນ ເປັນເຫດໃຫ້ສັດຕູຜູ້ມຸ້ງຄວາມທຸກພໍໃຈ
ໄດ້ເກີດຂຶ້ນແກ່ອາດຕະມາ ຍັງບໍ່ເສື່ອມຄາຍເລີຍ
ຍ້ອນຄວາມໂກດເປັນອາລົມຂອງຄົນໂງ່

[໕໖] ອັນໜຶ່ງ ເມື່ອເກີດຄວາມໂກດຂຶ້ນ
ບຸກຄົນຍ່ອມບໍ່ຢັ່ງຮູ້ປະໂຫຍດຂອງຕົວເອງ
ຄວາມໂກດນັ້ນເກີດຂຶ້ນແລ້ວແກ່ອາດຕະມາ ຍັງບໍ່ເສື່ອມຄາຍເລີຍ
ຍ້ອນຄວາມໂກດເປັນອາລົມຂອງຄົນໂງ່

[໕໗] ຄົນຖືກຄວາມໂກດໃດຄອບງຳ ຍ່ອມລະຖິ້ມກຸສົນທຳ
ເຮັດປະໂຫຍດແມ່ນອັນໄພບູນໃຫ້ເສຍໄປ
ຄວາມໂກດນັ້ນມີເສນາເປັນຕາຍ້ານ ມີກຳລັງຍ່ຳຍີ
ຄວາມໂກດຂອງອາດຕະມາຍັງບໍ່ເສື່ອມຄາຍອອກເລີຍ ມະຫາບໍພິດ

[๔๗] ເມື່ອໄມ້ແຫ້ງສຽດສີກັນຢູ່ກໍເກີດໄຟປ່າ
ໄຟນັ້ນເກີດຈາກໄມ້ແຫ້ງອັນໃດກໍໄໝ້ໄມ້ແຫ້ງນັ້ນເອງ

[๔๙] ຄວາມໂກດຍ່ອມເກີດຂຶ້ນຍ້ອນຄວາມແຂ່ງດີຂອງຄົນພານຜູ້ໂງ່ຈ້າ
ບໍ່ມີຄວາມຮູ້ ແມ່ນເຂົາກໍຖືກຄວາມໂກດນັ້ນແລເຜົາຜານ

[๕๐] ຄວາມໂກດຍ່ອມເພີ່ມພູນແກ່ຜູ້ໃດເໝືອນດັ່ງໄຟທີ່ກອງຫຍ້າແລະໄມ້ແຫ້ງ
ຜູ້ນັ້ນຍ່ອມເສື່ອມຍົດເໝືອນດວງຈັນຂ້າງແຮມ

[๕๑] ຜູ້ໃດຣະງັບຄວາມໂກດໄດ້ເໝືອນໄຟທີ່ປາສະຈາກເຊື້ອ
ຜູ້ນັ້ນຍົດຍ່ອມບໍລິບູນເໝືອນດວງຈັນຂ້າງຂຶ້ນ

**ຈູລະໂພທິຊາດົກທີ ๔ ຈົບ**

## ๕. ມັນທັບພະຍະຊາດົກ (๔๔๔)
## ວ່າດ້ວຍມັນທັບພະຍະຄະຫະບໍດີ

(ດາບົດທຳສັດຈະອາຈາວ່າ)

[๕๒] ອາດຕະມາຕ້ອງການບຸນ ມີຈິດເຫຼື້ອມໃສ
ປະພຶດພົມມະຈັນຢູ່ໄດ້ພຽງ ๗ ວັນທໍ່ນັ້ນ
ຕໍ່ແຕ່ນັ້ນ ແມ່ນຈະບໍ່ພໍໃຈປະພຶດພົມມະຈັນ
ກໍຍັງປະພຶດມາເກີນ ๕๐ ປີ
ດ້ວຍສັດຈະອາຈານີ້ ຂໍຈົ່ງມີຄວາມປອດໄພ
ຂໍພິດຈົ່ງຄາຍ ຂໍຍັນຍະທັດກຸມານຈົ່ງລອດຊີວິດ

(ບິດາທຳສັດຈະອາຈາວ່າ)

[๕๓] ຍ້ອນແຕ່ໃດແຕ່ໃດມາ ຂ້າພະເຈົ້າເຫັນແຂກໃນເວລາມາພັກ
ກໍບໍ່ຍິນດີໃຫ້ພັກ
ອັນໜຶ່ງ ສະມະນະແລະພາມທັງຫຼາຍແມ່ນຜູ້ເປັນພະຫູສູດ
ກໍບໍ່ຮູ້ຄວາມທີ່ຂ້າພະເຈົ້າບໍ່ພໍໃຈ
ຂ້າພະເຈົ້າແມ່ນຈະບໍ່ພໍໃຈກໍຕາມ ກໍຍັງໃຫ້ທານ
ດ້ວຍສັດຈະອາຈານີ້ ຂໍຈົ່ງມີຄວາມປອດໄພ
ຂໍພິດຈົ່ງຄາຍ ຂໍຍັນຍະທັດລູກພໍ່ຈົ່ງລອດຊີວິດ

(ມານດາທຳສັດຈະອາຈາວ່າ)

[໓໔]	ລູກຮັກ ອະສໍຣະພິດທີ່ມີພິດຮ້າຍແຮງຕົວໃດ
ໄດ້ໄປ່ໄລ່ຂຶ້ນຈາກປ່ອງມາກັດເຈົ້າ
ວັນນີ້ ອະສໍຣະພິດຕົວນັ້ນ ແລະບິດາຂອງເຈົ້າ
ບໍ່ມີຄວາມແຕກຕ່າງກັນເລີຍ
ຍ້ອນບໍ່ໄດ້ເປັນທີ່ຮັກຂອງແມ່
ດ້ວຍສັດຈະອາຈານີ້ ຂໍຈົ່ງມີຄວາມປອດໄພ
ຂໍພິດຈົ່ງຄາຍ ຂໍຍັນຍະທັດລູກຊາຍຈົ່ງລອດຊີວິດ

(ນາຍມັນທັບພະຍະຖາມທີປາຍະນະດາບົດວ່າ)

[໓໕]	ຊົນບາງພວກຜູ້ສະງົບຣະງັບ ເຝິກຕົນແລ້ວ ບວດເປັນດາບົດ
ມີຮູບຮ່າງບໍ່ໜ້າຕ້ອງການບໍ່ມີເລີຍ ນອກສາຈາກກັນທະດາບົດ
ທ່ານທີປາຍະນະດາບົດ ທ່ານຣັງກຽດອັນໃດ
ຈຶ່ງບໍ່ພໍໃຈປະພຶດພົມມະຈັນ

(ທີປາຍະນະດາບົດຕອບວ່າ)

[໓໖]	ກັນທະດາບົດນັ້ນເປັນຄົນໂງ່ແທ້ນໍ ເໝືອນກັບເດັກກືກນ້ຳລາຍ
ອອກບວດດ້ວຍສັດທາແລ້ວຍັງກັບໄປຫາສິ່ງນັ້ນອີກ
ອາດຕະມາຣັງກຽດວາທະເຊັ່ນນີ້
ເຖິງບໍ່ພໍໃຈກໍຍັງປະພຶດພົມມະຈັນ
ເຊິ່ງເປັນຖານະທີ່ວິນຍູຊົນສັນເສີນແລະເປັນຖານະຂອງສັດຕະບຸຣຸດ
ອາດຕະມາຈຶ່ງພ່ຳເພັງບຸນແມ່ນແນວນີ້

(ທີປາຍະນະດາບົດຍ້ອນຖາມວ່າ)

[໓໗]	ທ່ານລ້ຽງດູສະມະນະ ພາມ ແລະຄົນເດີນທາງ
ໃຫ້ອີ່ມໜ່ຳດ້ວຍເຂົ້າແລະນ້ຳ
ເຮືອນຂອງທ່ານນີ້ພຽບພ້ອມດ້ວຍເຂົ້າແລະນ້ຳ
ມີພັກສາຫານປຽບດັ່ງອູ່ເຂົ້າອູ່ນ້ຳ
ເມື່ອເປັນເຊັ່ນນັ້ນ ທ່ານຣັງກຽດວາທະອັນໃດ
ເຖິງບໍ່ພໍໃຈກໍຍັງໃຫ້ທານນີ້

(ນາຍມັນທັບພະຍະຕອບວ່າ)

[໖໗] ບິດາແລະປູ່ຂອງຂ້າພະເຈົ້າເປັນຄົນມີສັດທາ
ເປັນທານະບໍດີ ເປັນຜູ້ຮູ້ຄວາມປະສົງຂອງຜູ້ຂໍ
ຂ້າພະເຈົ້າຜູ້ປະພຶດຕາມປະເພນີຂອງຕະກູນນັ້ນ
ຢ່າໄດ້ຊື່ວ່າ ເປັນຄົນທຳລາຍຕະກູນຄົນສຸດທ້າຍເລີຍ
ຂ້າພະເຈົ້າຮັງກຽດວາທະເຊັ່ນນັ້ນ
ເຖິງບໍ່ພໍໃຈກໍຍັງຄົງໃຫ້ທານນີ້

(ນາຍມັນທັບພະຍະຖາມພັນລະຍາວ່າ)

[໖໙] ນີ້ນາງຜູ້ມີຊວດຊົງງາມ ເຮົາໄດ້ນຳເຈົ້າຜູ້ຍັງເປັນຍິງໄວລຸ້ນ
ຍັງບໍ່ມີປັນຍາສາມາດຈັດແຈງຊັບໄດ້ມາຈາກຕະກູນຍາດ
ແລະເຈົ້າກໍບໍ່ໄດ້ບອກໃຫ້ຮູ້ເຖິງຄວາມທີ່ເຈົ້າບໍ່ຮັກເຮົາ
ຍັງປົນນິບັດເຮົາໂດຍປາສະຈາກຄວາມຮັກ ເມື່ອເປັນເຊັ່ນນັ້ນ
ຍ້ອນເຫດໃດ ເຈົ້າຈຶ່ງຍັງຢູ່ຮ່ວມກັບເຮົາຢ່າງນີ້ ແມ່ນາງຜູ້ຈະເລີນ

(ພັນລະຍາຕອບວ່າ)

[໗໐] ຕັ້ງແຕ່ໃດແຕ່ໃດດົນນານມາແລ້ວ
ຍິງສາວຄົນໜຶ່ງຖິ້ມສາມີແລ້ວໄດ້ຊາຍອື່ນເປັນສາມີບໍ່ມີໃນຕະກູນນີ້
ຂໍຂ້ານ້ອຍຜູ້ປະພຶດຕາມປະເພນີຂອງຕະກູນນັ້ນ
ຢ່າຊື່ວ່າ ເປັນຄົນທຳລາຍຕະກູນຄົນສຸດທ້າຍເລີຍ
ຂ້ານ້ອຍຮັງກຽດວາທະເຊັ່ນນັ້ນ ເຖິງບໍ່ພໍໃຈກໍຍັງປົນນິບັດທ່ານຢູ່

(ພັນລະຍາກ່າວຂໍໂທດນາຍມັນທັບພະຍະຜູ້ເປັນສາມີວ່າ)

[໗໑] ທ່ານມັນທັບພະຍະ ວັນນີ້ຂ້ານ້ອຍເວົ້າຄຳທີ່ບໍ່ຄວນເວົ້າ
ເພື່ອເຫັນແກ່ລູກ ຂໍທ່ານຈົ່ງອົດໂທດຄຳເວົ້າທີ່ຂ້ານ້ອຍເວົ້ານັ້ນເທີ້ນ
ບໍ່ມີສິ່ງອື່ນໃດໃນໂລກນີ້ ຈະຍິ່ງໄປກວ່າຄວາມຮັກລູກ
ຂໍຍັນຍະທັດລູກຂອງເຮົານັ້ນຈົ່ງລອດຊີວິດເທີ້ນ

**ມັນທັບພະຍະຊາດົກທີ ໖ ຈົບ**

# ๗. ນິໂຄທະຊາດົກ (໔໔໕)
## ວ່າດ້ວຍພຣະເຈົ້ານິໂຄທະ

(ນາຍໂປດຕົກະຂາບທູນພຣະເຈົ້ານິໂຄດວ່າ)

[໗໔] ຂໍເດຊະພຣະເຈົ້ານິໂຄດ ພຣະອົງຊົງເຂົ້າພຣະທະໄທແນວໃດ
ຕາມທີ່ສາຂະເສນາບໍດີກ່າວວ່າ ເຮົາບໍ່ຮູ້ຈັກມັນເລີຍວ່າ
ມັນຜູ້ນີ້ເປັນໃຜ ຫຼືເປັນຄົນສອດແນມຂອງໃຜ

[໗໓] ຕໍ່ແຕ່ນັ້ນ ຄົນຜູ້ທຳຕາມຄຳສັ່ງຂອງສາຂະເສນາບໍດີ
ໄດ້ຕົບໜ້າຂ້າພຣະອົງແລ້ວລາກຄໍນຳຂ້າພຣະອົງອອກໄປ

[໗໔] ຂໍເດຊະພຣະອົງຜູ້ເປັນໃຫຍ່ແຫ່ງໝູ່ຊົນ
ສາຂະເສນາບໍດີເພື່ອນຂອງພຣະອົງເປັນຄົນມີຄວາມຄິດຕ່ຳຊາມ
ອະກະຕັນຍູ ປະທຸດສະຮ້າຍມິດ ເຮັດກຳອັນບໍ່ປະເສີດເຊັ່ນນີ້

(ພຣະເຈົ້ານິໂຄດຕັດວ່າ)

[໗໕] ເພື່ອນ ເລື້ອງນີ້ເຮົາຍັງບໍ່ຮູ້ ທັງໃຜ ໆ ກໍບໍ່ໄດ້ບອກເຮົາ
ເຖິງເລື້ອງທີ່ສາຂະໄດ້ທຳການດຶງລາກທ່ານ ມີແຕ່ທ່ານໄດ້ບອກເຮົາ

[໗໖] ທ່ານສົ່ງເສີມເພື່ອນທັງສອງ ຄື ເຮົາແລະສາຂະໃຫ້ມີອາຊີບດີຂຶ້ນ
ຄື ທ່ານໄດ້ໃຫ້ອິດສະຣິຍະຍົດແກ່ພວກເຮົາເປັນໃຫຍ່ໃນໝູ່ມະນຸດ
ສົມບັດເຫຼົ່ານີ້ພວກເຮົາໄດ້ມາກໍຍ້ອນທ່ານ
ໃນເລື້ອງນີ້ເຮົາບໍ່ສົງໄສເລີຍ

[໗໗] ເມັດພືດທີ່ຖືກເຜົາໃນກອງໄຟຍ່ອມບໍ່ງອກຂຶ້ນ ສັນໃດ
ຄວາມດີທີ່ເຮັດໃນຄົນຊົ່ວກໍຍ່ອມພິນາດໄປບໍ່ງອກງາມ ສັນນັ້ນ

[໗໘] ສ່ວນຄວາມດີທີ່ເຮັດໃນຄົນຜູ້ມີຄວາມກະຕັນຍູ ມີສິນ
ມີຄວາມປະພຶດອັນປະເສີດ ຍ່ອມບໍ່ເສຍຫາຍ
ເໝືອນເມັດພືດໃນນາທີ່ດີ

(ພຣະຣາຊາຮັບສັ່ງວ່າ)

[໗໙] ກໍເຈົ້າສາຂະຜູ້ນີ້ເປັນຄົນຊົ່ວຊ້າ ຄົດໂກງ ມີຄວາມຄິດຍ່າງຄົນຊົ່ວ
ຈົ່ງເອົາຫອກແທງມັນ ເຮົາບໍ່ຕ້ອງການໃຫ້ມັນມີຊີວິດຢູ່

(ນາຍໂປດຕິກະຂາບທູນວ່າ)

[໗໐] ຂໍເດຊະພຣະມະຫາຣາດ ຂໍພຣະອົງຊົງໂພດງົດໂທດແກ່ເຂົາເທີ້ນ
ຊີວິດນຳກັບຄືນມາບໍ່ໄດ້ ຂໍເດຊະພຣະອົງຜູ້ສົມມຸດຕິເທບ
ຂໍພຣະອົງຊົງໂພດງົດໂທດແກ່ຄົນຊົ່ວເທີ້ນ
ຂ້າພຣະອົງບໍ່ຕ້ອງການຂ້າເຂົາ

(ນາຍໂປດຕິກະກ່າວສອນລູກສາວລູກຊາຍວ່າ)

[໗໑] ຄວນຄົບແຕ່ພຣະເຈົ້ານິໂຄດທໍ່ນັ້ນ
ຢ່າເຂົ້າໄປຄົບຫາເຈົ້າສາຂະເສນາບໍດີເລີຍ
ການຕາຍໃນສຳນັກຂອງພຣະເຈົ້ານິໂຄດປະເສີດກວ່າ
ການມີຊີວິດຢູ່ໃນສຳນັກຂອງເຈົ້າສາຂະເສນາບໍດີຈະປະເສີດອັນໃດ

**ນິໂຄທະຊາດົກທີ ໗ ຈົບ**

## ໗. ຕັກກະລະຊາດົກ (໔໔໖)
## ວ່າດ້ວຍຕັກກະລະບັນດິດ

(ລູກຊາຍໄວ ໗ ຂວບຖາມພໍ່ວ່າ)

[໗໔] ທ່ານພໍ່ ຫົວຫອມ ຫົວກະທຽມກໍບໍ່ມີ ມັນເທດກໍບໍ່ມີ
ມັນມີເສືອກໍບໍ່ມີ ເຫງົ້າຕານກໍບໍ່ມີເລີຍ
ທ່ານພໍ່ຕ້ອງການອັນໃດ
ຈຶ່ງຂຸດຂຸມຢູ່ຄົນດຽວກາງປ່າຊ້າໃນປ່າ

(ພໍ່ຕອບວ່າ)

[໗໖] ລູກຮັກ ປູ່ຂອງເຈົ້າທຸບພົນລະພາບຫຼາຍແລ້ວ
ຖືກຄວາມລຳບາກຍ້ອນຄວາມເຈັບປ່ວຍຫຼາຍຢ່າງບຽດບຽນ
ມື້ນີ້ ພໍ່ຈະຂຸດຂຸມຝັງປູ່ເຈົ້າ
ຍ້ອນພໍ່ບໍ່ພໍໃຈຊີວິດແນວນັ້ນຂອງປູ່ເຈົ້າ

(ລູກຊາຍກ່າວວ່າ)

[໗໔] ທ່ານພໍ່ໄດ້ຮັບຄວາມຄິດອັນຊົ່ວຊ້ານີ້ມາ

ແລ້ວເຮັດກຳອັນຫຍາບຊ້າຂາດປະໂຫຍດ
ທ່ານພໍ່ ເມື່ອທ່ານພໍ່ແກ່ຊະຣາກໍຈັກໄດ້ຮັບການກະທຳແນວນີ້ແມ່ນຈາກລູກ
ເຖິງລູກກໍຈະປະພຶດຕາມປະເພນີຂອງຕະກູນນັ້ນ
ຈະຂຸດຂຸມຝັງທ່ານພໍ່ຄືກັນ

(ພໍ່ກ່າວວ່າ)

[໗໕] ນີ້ເຈົ້າເດັກນ້ອຍ ເຈົ້າເວົ້າກະທົບຂົ່ມຂູ່ພໍ່ດ້ວຍວາຈາທີ່ຫຍາບ
ລູກຮັກ ເຈົ້າເປັນລູກແທ້ ໆ ຂອງພໍ່ ກັບບໍ່ອະນຸເຄາະເກື້ອກູນພໍ່

(ລູກຊາຍກ່າວໂຕ້ຕອບວ່າ)

[໗໖] ທ່ານພໍ່ ລູກຈະບໍ່ອະນຸເຄາະເກື້ອກູນທ່ານພໍ່ກໍຫາບໍ່ໄດ້
ແມ່ນລູກກໍອະນຸເຄາະເກື້ອກູນທ່ານພໍ່
ແຕ່ບໍ່ອາດຈະຫ້າມທ່ານພໍ່ຜູ້ກຳລັງເຮັດກຳຊົ່ວຊ້ານັ້ນ
ຈາກການກະທຳນັ້ນໄດ້

(ພໍ່ກ່າວວ່າ)

[໗໗] ທ້າວສະວິດຖະ ຜູ້ໃດມີຄວາມຊົ່ວຊ້າ
ບຽດບຽນພໍ່ແມ່ຜູ້ບໍ່ປະທຸດສະຮ້າຍຕົນ
ເມື່ອຕາຍໄປຊາດໜ້າ ຜູ້ນັ້ນຈະຕົກນະຮົກຢ່າງບໍ່ຕ້ອງສົງໄສ

[໗໘] ທ້າວສະວິດຖະ ສ່ວນຜູ້ໃດບຳຣຸງພໍ່ແມ່ດ້ວຍເຂົ້າແລະນ້ຳ
ເມື່ອຕາຍໄປຊາດໜ້າ ຜູ້ນັ້ນຈະຂຶ້ນສະຫວັນຢ່າງບໍ່ຕ້ອງສົງໄສ

[໗໙] ລູກຮັກ ເຈົ້າບໍ່ອະນຸເຄາະເກື້ອກູນພໍ່ກໍຫາບໍ່ໄດ້
ເຈົ້າອະນຸເຄາະເກື້ອກູນພໍ່ແທ້ ໆ
ແຕ່ພໍ່ຖືກແມ່ຂອງເຈົ້າສັ່ງມາ ຈຶ່ງກະທຳກຳຫຍາບຊ້າແນວນີ້

(ລູກຊາຍກ່າວວ່າ)

[໘໐] ພັນລະຍາຂອງພໍ່ບໍ່ແມ່ນຄົນດີ ເປັນແມ່ບັງເກີດເກົ້າຂອງລູກນັ້ນເອງ
ພໍ່ຄວນຂັບແມ່ອອກຈາກເຮືອນໄປ
ແມ່ນັ້ນຄວນຈະໄດ້ຮັບທຸກຢ່າງອື່ນແດ່

[໙໑] ພັນລະຍາຂອງພໍ່ບໍ່ແມ່ນຄົນດີ
ເປັນແມ່ບັງເກີດເກົ້າຂອງລູກນັ້ນເອງ
ແມ່ນັ້ນມີຄວາມຄິດຊົ່ວຊ້າ ໄດ້ຮັບການເຝິກແລ້ວໝົດພະຍົດ
ເໝືອນຊ້າງພັງ ຈຶ່ງໃຫ້ກັບມາຢູ່ຕໍ່ໄປ

**ຕັກກະລະຊາດົກທີ ໗ ຈົບ**

# ໙. ມະຫາທຳມະປາລະຊາດົກ (໔໔໗)
# ວ່າດ້ວຍມະຫາທຳມະປາລະກຸມານ

(ອາຈານທິສາປາໂມກຖາມພາມວ່າ)

[໙໔] ຂໍ້ວັດຂອງທ່ານເປັນແນວໃດ
ອັນໜຶ່ງ ພົມມະຈັນຂອງທ່ານເປັນແນວໃດ
ນີ້ເປັນຜົນແຫ່ງຂໍ້ວັດແລະພົມມະຈັນທີ່ທ່ານປະພຶດດີແລ້ວແນວໃດ
ພາມ ຂໍທ່ານໂຜດບອກເນື້ອຄວາມນັ້ນແກ່ຂ້າພະເຈົ້າວ່າ
ຍ້ອນເຫດໃດນໍ ພວກທ່ານຈຶ່ງບໍ່ຕາຍແຕ່ໜຸ່ມ ໆ

(ພາມຕອບວ່າ)

[໙໓] ພວກເຮົາປະພຶດທຳ ບໍ່ກ່າວຕົວະ
ງົດເວັ້ນກຳຊົ່ວ ລະເວັ້ນກຳອັນບໍ່ປະເສີດທັງໝົດ
ຍ້ອນເຫດນັ້ນແລ ພວກເຮົາຈຶ່ງບໍ່ຕາຍແຕ່ໜຸ່ມ ໆ

[໙໔] ພວກເຮົາຟັງທຳທັງຂອງອະສັດຕະບຸຣຸດແລະສັດຕະບຸຣຸດ
ແຕ່ພວກເຮົາບໍ່ພໍໃຈທຳຂອງອະສັດຕະບຸຣຸດເລີຍ
ຈຶ່ງລະເວັ້ນອະສັດຕະບຸຣຸດ ບໍ່ລະເວັ້ນສັດຕະບຸຣຸດ
ຍ້ອນເຫດນັ້ນ ພວກເຮົາຈຶ່ງບໍ່ຕາຍແຕ່ໜຸ່ມ ໆ
[໙໕] ກ່ອນຈະໃຫ້ທານ ພວກເຮົາກໍດີໃຈ ແມ່ນຂະນະໃຫ້ກໍພໍໃຈ
ແມ່ນໃຫ້ໄປແລ້ວກໍບໍ່ເດືອດຮ້ອນໃນພາຍຫຼັງ
ເພາະສະນັ້ນ ພວກເຮົາຈຶ່ງບໍ່ຕາຍແຕ່ໜຸ່ມ ໆ
[໙໖] ພວກເຮົາລ້ຽງດູສະມະນະ ພາມ ຄົນເດີນທາງ
ວະນິພົກ ຍາຈົກ ແລະຄົນຈົນໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳ
ຍ້ອນເຫດນັ້ນ ພວກເຮົາຈຶ່ງບໍ່ຕາຍແຕ່ໜຸ່ມ ໆ

[໙໗]　ອັນໜຶ່ງ ພວກເຮົາບໍ່ນອກໃຈພັນລະຍາ
ເຖິງພວກພັນລະຍາກໍບໍ່ນອກໃຈພວກເຮົາ
ນອກຈາກພັນລະຍາເຫຼົ່ານັ້ນແລ້ວ
ພວກເຮົາປະພຶດພົມມະຈັນ
ຍ້ອນເຫດນັ້ນ ພວກເຮົາຈຶ່ງບໍ່ຕາຍແຕ່ໜຸ່ມ ໆ

[໙໘]　ພວກເຮົາງົດເວັ້ນການຂ້າສັດທັງປວງ
ລະເວັ້ນສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ໃນໂລກ ບໍ່ດື່ມນ້ຳເມົາ ບໍ່ເວົ້າຕົວະເລີຍ
ຍ້ອນເຫດນັ້ນ ພວກເຮົາຈຶ່ງບໍ່ຕາຍແຕ່ໜຸ່ມ ໆ
[໙໙]　ບຸດທັງຫຼາຍທີ່ເກີດໃນຍິງຊັ້ນສູງມີມາຣະຍາດອັນດີງາມເຫຼົ່ານັ້ນ
ເປັນຄົນສະຫຼາດ ມີປັນຍາຫຼາຍ
ເປັນພະຫູສູດ ຈົບໄຕຣເພດ
ຍ້ອນເຫດນັ້ນ ພວກເຮົາຈຶ່ງບໍ່ຕາຍແຕ່ໜຸ່ມ ໆ
[໑໐໐]　ພໍ່ແມ່ ອ້າຍນ້ອງຊາຍ ລູກເມຍ
ແລະເຮົາທັງໝົດກໍປະພຶດທຳຍ້ອນເຫດໂລກໜ້າ
ຍ້ອນເຫດນັ້ນ ພວກເຮົາຈຶ່ງບໍ່ຕາຍແຕ່ໜຸ່ມໆ
[໑໐໑]　ທາດຊາຍຍິງ ບຸກຄົນອ້ອມຂ້າງທີ່ອາໄສລ້ຽງຊີບ
ແລະຄົນງານທັງໝົດກໍປະພຶດທຳຍ້ອນເຫດໂລກໜ້າ
ຍ້ອນເຫດນັ້ນ ພວກເຮົາຈຶ່ງບໍ່ຕາຍແຕ່ໜຸ່ມ ໆ

(ພາມສະແດງຄຸນຂອງຜູ້ປະພຶດທຳວ່າ)

[໑໐໔]　ທຳແລຍ່ອມຮັກສາຜູ້ປະພຶດທຳ
ທຳທີ່ຕົນປະພຶດດີແລ້ວຍ່ອມນຳສຸກມາໃຫ້
ນີ້ເປັນອານິສົງໃນທຳທີ່ຕົນປະພຶດດີແລ້ວ
ຜູ້ປະພຶດທຳຍ່ອມບໍ່ເຖິງທຸກຄະຕິ

[໑໐໓]　ທຳແລຍ່ອມຮັກສາຜູ້ປະພຶດທຳ
ເໝືອນຮົ່ມຄັນໃຫຍ່ໃນລະດູຝົນ
ທຳມະປາລະກຸມານຂອງເຮົາມີທຳຄຸ້ມຄອງ ຍັງຢູ່ເປັນສຸກ
ກະດູກທີ່ທ່ານນຳມາເປັນກະດູກຄົນອື່ນ

**ມະຫາທຳມະປາລະຊາດົກທີ ໗ ຈົບ**

# ໑໐. ກຸກກຸຕະຊາດົກ (໔໔໗)
## ວ່າດ້ວຍພະຍາໄກ່

(ພະຍາໄກ່ກ່າວວ່າ)

[໑໐໔] ບໍ່ຄວນວາງໃຈໃນຄົນທຳຄວາມຊົ່ວ
ຄົນເວົ້າເຫຼາະແຫຼະ ຄົນເຫັນແກ່ຕົວ
ແມ່ນຄົນທີ່ສະງົບເກີນໄປກໍບໍ່ຄວນວາງໃຈ

[໑໐໕] ເພາະວ່າມີຄົນພວກໜຶ່ງເປັນເຊັ່ນກັບງົວກະຫາຍນ້ຳ
ພຽງແຕ່ເວົ້າສຽດສີມິດ ແຕ່ບໍ່ເຮັດຄືທີ່ເວົ້າ

[໑໐໖] ຜູ້ໃດດີແຕ່ປະນົມມືໄຫວ້
ເວົ້າວົກວົນ ເປັນມະນຸດແຕ່ເປືອກ
ບໍ່ມີຄວາມກະຕັນຍູ
ຜູ້ນັ້ນກໍບໍ່ຄວນນັ່ງໃກ້

[໑໐໗] ອັນໜຶ່ງ ບໍ່ເພິ່ງວາງໃຈສະຕີຫຼືບຸຣຸດຜູ້ມີຈິດປັ່ນປ່ວນ
ແມ່ນຄົນເປີດເຜີຍຄວາມສຳພັນມີປະການຕ່າງ ໆ ເຊັ່ນນັ້ນ
ກໍບໍ່ຄວນວາງໃຈ

[໑໐໘] ຄົນຜູ້ຕົກຢູ່ໃນກຳຊົ່ວ
ມີວາຈາບໍ່ໝັ້ນຄົງ ຂ້າໄດ້ທຸກຄົນ
ເໝືອນດາບທີ່ລັບແລ້ວເຊື່ອງໄວ້
ແມ່ນຄົນເຊັ່ນນັ້ນກໍບໍ່ຄວນວາງໃຈ

[໑໐໙] ຄົນບາງພວກໃນໂລກນີ້ ເປັນຄົນທຽມມິດ
ມີວາຈາຄົມຄາຍ ແຕ່ຂາດນ້ຳໃຈ
ເຂົ້າໄປຫາດ້ວຍອຸບາຍຕ່າງ ໆ
ແມ່ນຄົນເຊັ່ນນັ້ນກໍບໍ່ຄວນວາງໃຈ

[໑໑໐] ຄົນໃດເຫັນອາມິດຫຼືຊັບໃນບ່ອນໃດຍັງລະຖິ້ມເພື່ອນນັ້ນໄປໄດ້
ຄົນເຊັ່ນນັ້ນເປັນຄົນໂງ່ ທຳລາຍມິດ

(ພຣະຣາຊາຕັດວ່າ)

[๑๑๑] สัดจำนวนหลายปีกปิดตีนไว้ เป็นคืนทยมมิด
ถ้าคืบหาย่ คืนเหล่านี้เป็นคืนชั่ว
ควนละเว้นสา เหมือนไก่ละเว้นแหลว

[๑๑๔] อันหนึ่ง ผู้ใดบ่ฮู้เท่าทันเหตที่เกิดขึ้นโดยทันที
ผู้นั้นจะตกอยู่ในอำนาดของสัดตู
และจะเดือดร้อนในพายหลัง

[๑๑๓] ส่วนผู้ใดฮู้เท่าทันเหตที่เกิดขึ้นโดยทันที
ผู้นั้นย่อมพ้นจากความคับขันอันเกิดจากสัดตู
เหมือนไก่พ้นจากแหลว

[๑๑๔] คืนผู้บ่ตั้งอยู่ในทำ มีปีกกะตีกำจัดอยู่เป็นนิด
เหมือนบ้วงที่เขาดักไว้ในป่าแนวนั้น
นักปราชญ์ผู้มีปัญญาพิจาละนาควนเว้นให้ห่างไก
เหมือนไก่ในป่าไผ่ละเว้นแหลว

**กุกกุตะชาดกที่ ๑๐ จົບ**

## ๑๑. มัดถะกุนทะลิชาดก (๔๔๙)
## ว่าด้วยมัดถะกุนทะลิเทบพะบุด

(พามจะถามมานົບว่า)

[๑๑๕] เจ้าปะดັບตົກแต่งฮ่างกายใส่ตุ้มหูกັ້ງ
ทัดຊົງດອກໄມ້ ມີກາຍລູບໄລ້ດ້ວຍຈຸນແກ່ນຈັນແດງ
ປະຄອງແຂນຄ່ຳຄວນຢູ່ກາງປ່າ
ເຈົ້າມີທຸກເລື້ອງໃດ

(ມານົບຕອບວ່າ)

[๑๑๖] ເຮືອນລົດທີ່ເຮັດດ້ວຍຄຳງາມຜຸດຜ່ອງເກີດຂຶ້ນແກ່ຂ້າພະເຈົ້າ
ຂ້າພະເຈົ້າຍັງຫາລໍ້ລົດທັງຄູ່ບໍ່ໄດ້
ຍ້ອນຄວາມທຸກນັ້ນ ຂ້າພະເຈົ້າຈັກຍອມສະລະຊີວິດ

(ພາມຮັບຮອງວ່າ)

[໑໑໗] ທ້າວມານົບຜູ້ຈະເລີນ ລໍ້ຄໍາ ລໍ້ແກ້ວມະນີ ລໍ້ທອງແດງ
ຫຼືລໍ້ເງິນ ຈົ່ງບອກເຮົາມາ ເຮົາຈະຈັດລໍ້ທັງຄູ່ໃຫ້ເຈົ້າ

[໑໑໘] ມານົບໄດ້ກ່າວແກ່ພາມນັ້ນວ່າ
ດວງຈັນແລະດວງອາທິດທັງ ໒ ຍ່ອມຜາກົດໃນທ້ອງຟ້ານັ້ນ
ລົດຄໍາຂອງຂ້າພະເຈົ້າຍ່ອມງາມດ້ວຍລໍ້ທັງຄູ່ນັ້ນ

(ພາມກ່າວວ່າ)

[໑໑໙] ທ້າວມານົບ ເຈົ້າໂງ່ແທ້ ທີ່ມາປາຖະໜາສິ່ງທີ່ບໍ່ຄວນປາຖະໜາ
ເຮົາເຂົ້າໃຈວ່າ ເຈົ້າຈັກຕາຍສາລ້າ
ເພາະເຈົ້າບໍ່ມີທາງຈະໄດ້ດວງຈັນແລະດວງອາທິດດອກ

(ມານົບກ່າວວ່າ)

[໑໒໐] ແມ່ນການໂຄຈອນໄປມາຂອງດວງຈັນແລະດວງອາທິດກໍຍັງຜາກົດ
ຣັດສະໝີຍັງຜາກົດໃນວິຖີທັງ ໒
ສ່ວນຄົນທີ່ຕາຍໄປແລ້ວຍ່ອມບໍ່ຜາກົດ
ເຮົາທັງ ໒ ຜູ້ຮ້ອງໄຫ້ຄໍ່າຄວນຢູ່ໃນບ່ອນນີ້ ໃຜນໍໂງ່ກວ່າກັນ

(ພາມກ່າວວ່າ)

[໑໒໑] ທ້າວມານົບ ເຈົ້າເວົ້າແທ້ບໍ
ເຮົາທັງ ໒ ຜູ້ຮ້ອງໄຫ້ຄໍ່າຄວນຢູ່
ເຮົານີ້ແລໂງ່ກວ່າ
ທີ່ມາປາຖະໜາຄົນທີ່ຕາຍໄປແລ້ວ
ເໝືອນເດັກນ້ອຍຮ້ອງໄຫ້ຢາກໄດ້ດວງຈັນ
[໑໒໒] ເຈົ້າຊ່ອຍຣະງັບເຮົາຜູ້ຮ້ອນຮົນໃຫ້ສະງົບ
ດັບຄວາມກະວົນກະວາຍທັງໝົດໄດ້
ເໝືອນຄົນໃຊ້ນໍ້າຫົດດັບໄຟທີ່ໄໝ້ນໍ້າມັນປຽງ
[໑໒໓] ເຈົ້າໄດ້ບັນເທົາຄວາມເສົ້າໂສກຂອງເຮົາຜູ້ກໍາລັງເສົ້າໂສກເຖິງບຸດ
ຊື່ວ່າໄດ້ຊ່ອຍຖອນລູກສອນຄືຄວາມໂສກ
ເຊິ່ງສຽບແທງຫົວໃຈຂອງເຮົາອອກໄດ້ແລ້ວນໍ

[໑໘໔] ທ້າວມານົບ ເຮົາເຊິ່ງເຈົ້າຊ່ອຍຖອນລູກສອນຄືຄວາມໂສກອອກໃຫ້ແລ້ວ
ເປັນຜູ້ປາສະຈາກຄວາມເສົ້າໂສກ ບໍ່ຂຸ່ນມົວ ບໍ່ຮ້ອງໄຫ້
ຍ້ອນໄດ້ຟັງຄໍາຂອງເຈົ້າ

**ມັດຖະກຸນທະລີຊາດົກທີ ໑໑ ຈົບ**

## ໑໘. ພິລາຣະໂກສິຍະຊາດົກ (໔໕໐)
## ວ່າດ້ວຍທ້າວສັກກະທໍລະມານເສດຖີຕີນແມວ

(ທ້າວສັກກະຕັດວ່າ)

[໑໘໕] ສັດຕະບຸຣຸດທັງຫຼາຍເຖິງຈະບໍ່ຫຸງຕົ້ມກິນເອງ
ໄດ້ໂພຊະນະມາກໍປາຖະໜາທີ່ຈະໃຫ້
ສ່ວນທ່ານຫຸງຕົ້ມກິນເອງ ເຫດໃດນໍຈຶ່ງບໍ່ໃຫ້
ການບໍ່ໃຫ້ນັ້ນບໍ່ສົມຄວນເລີຍ

[໑໘໖] ຄົນບໍ່ໃຫ້ທານຍ້ອນເຫດ ໒ ຢ່າງນີ້
ຄື ຍ້ອນຂີ້ຖີ່ ໑ ຍ້ອນຜະໝາດ ໑
ຜູ້ຮູ້ເມື່ອຫວັງບຸນ ຄວນໃຫ້ທານ

[໑໘໗] ຄົນຂີ້ຖີ່ຢ້ານຕໍ່ຄວາມຫິວຄວາມກະຫາຍອັນໃດຈຶ່ງບໍ່ໃຫ້ທານ
ໄພຄືຄວາມຫິວແລະຄວາມກະຫາຍນັ້ນແລຍ່ອມມີແກ່ເຂົາຜູ້ບໍ່ໃຫ້
ຄົນຂີ້ຖີ່ຢ້ານຕໍ່ຄວາມຫິວແລະຄວາມກະຫາຍອັນໃດ
ຄວາມຫິວແລະຄວາມກະຫາຍນັ້ນແລຍ່ອມບຽດບຽນເຂົາຜູ້ເປັນຄົນພານ
ທັງໃນໂລກນີ້ແລະໂລກໜ້າ

[໑໘໘] ຍ້ອນເຫດນັ້ນ ບັນດິດເພິ່ງຄອບງໍາມົນທິນ
ກໍາຈັດຄວາມຂີ້ຖີ່ແລ້ວເພິ່ງໃຫ້ທານ
ຍ້ອນບຸນເປັນບ່ອນເພິ່ງຂອງເຫຼົ່າສັດໃນໂລກໜ້າ

(ສຸຣິຍະເທບພະບຸດສະເດັດລົງມາແລ້ວ ຂໍອາຫານວ່າ)

[໑໘໙] ອະສັດຕະບຸຣຸດທັງຫຼາຍເມື່ອຈະໃຫ້ທານຊື່ວ່າໃຫ້ໄດ້ຍາກ
ເມື່ອຈະເຮັດກໍາກໍຊື່ວ່າເຮັດໄດ້ຍາກ
ທໍາຂອງສັດຕະບຸຣຸດທັງຫຼາຍພວກອະສັດຕະບຸຣຸດຮູ້ໄດ້ຍາກ
ແລະພວກອະສັດຕະບຸຣຸດກໍເຮັດນໍາໄດ້ຍາກ

[໑໓໐] ເພາະສະນັ້ນ ສັດຕະບຸຣຸດແລະອະສັດຕະບຸຣຸດ
ຈຶ່ງມີຄະຕິທີ່ໄປຈາກໂລກນີ້ຕ່າງກັນ ຄື
ພວກອະສັດຕະບຸຣຸດຍ່ອມໄປສູ່ນະຮົກ
ພວກສັດຕະບຸຣຸດຍ່ອມໄປສູ່ສະຫວັນ

(ມາຕະລິເທບພະບຸດສະເດັດມາສະແດງທຳວ່າ)

[໑໓໑] ແມ່ນມີໄທຍະທຳພຽງເລັກໜ້ອຍ ຄົນພວກໜຶ່ງກໍໃຫ້
ຄົນພວກໜຶ່ງມີໄທຍະທຳຫຼາຍ ແຕ່ບໍ່ໃຫ້
ທັກຂິນາຈາກໄທຍະທຳສ່ວນໜ້ອຍທີ່ບຸກຄົນໃຫ້ແລ້ວ
ນັບໄດ້ສະເໝີກັບການໃຫ້ເປັນພັນ

(ປັນຈະສິຂະເທບພະບຸດສະເດັດມາສະແດງທຳວ່າ)

[໑໓໔] ແມ່ນຜູ້ໃດທ່ຽວສະແຫວງຫາອາຫານລ້ຽງລູກເມຍ
ເມື່ອມີຣາຍໄດ້ໜ້ອຍກໍຍັງໃຫ້ທານ ຜູ້ນັ້ນຊື່ວ່າຜູ້ປະພຶດທຳ
ການບູຊາຂອງຄົນທີ່ບູຊາຍັນດ້ວຍຊັບຈຳນວນນັບພັນນັບແສນຄົນເຫຼົ່ານັ້ນ
ຍັງບໍ່ເຖິງແມ່ນພຽງສ້ຽວໜຶ່ງຂອງຄົນຈົນຜູ້ປະພຶດທຳເຊັ່ນນັ້ນເລີຍ

(ເສດຖີໄດ້ຟັງດັ່ງນັ້ນແລ້ວ ໄດ້ກ່າວວ່າ)

[໑໓໓] ຍັນອັນໄພບູນຍ້ອນມີຄ່າຫຼາຍນີ້
ເຫດໃດຈຶ່ງບໍ່ມີຄ່າເທົ່າທຽມທານທີ່ບຸກຄົນໃຫ້ແລ້ວໂດຍສະໝ່ຳສະເໝີນໍ
ອັນໜຶ່ງ ການບູຊາຂອງຄົນທີ່ບູຊາຍັນດ້ວຍຊັບ
ຈຳນວນນັບພັນນັບແສນຄົນເຫຼົ່ານັ້ນຍ່ອມບໍ່ເຖິງ
ແມ່ນພຽງສ້ຽວໜຶ່ງຂອງຄົນຈົນ
ຜູ້ປະພຶດທຳເຊັ່ນນັ້ນເປັນແນວໃດ

(ປັນຈະສິຂະເທບພະບຸດກ່າວວ່າ)

[໑໓໔] ເພາະວ່າຄົນພວກໜຶ່ງຕັ້ງຢູ່ໃນກາຍຍະກຳເປັນຕົ້ນອັນບໍ່ສະໝ່ຳສະເໝີ
ທໍລະມານສັດແດ່ ຂ້າສັດແດ່ ເຮັດໃຫ້ສັດເສົ້າໂສກແດ່ ແລ້ວຈຶ່ງໃຫ້ທານ
ທັກຂິນານັ້ນມີໜ້າຊຸ່ມໄປດ້ວຍນ້ຳຕາ ປະກອບໄປດ້ວຍອາດຍາ
ຈຶ່ງບໍ່ທໍ່ຣາຄາຂອງທານທີ່ເຂົາໃຫ້ຢ່າງສະໝ່ຳສະເໝີ
ການບູຊາຂອງຄົນທີ່ບູຊາຍັນດ້ວຍຊັບຈຳນວນນັບພັນນັບແສນຄົນເຫຼົ່ານັ້ນ

ຍັງບໍ່ເຖິງແມ່ນພຽງສ່ວນໜຶ່ງຂອງຄົນຈົນ
ທີ່ປະພຶດທຳເຊັ່ນນັ້ນດ້ວຍອາການແນວນີ້

**ພິລາຣະໂກສິຍະຊາດົກທີ ໑໘ ຈົບ**

## ໑໓. ຈັກກະວາກະຊາດົກ (໔໕໑)
## ວ່າດ້ວຍນົກຈັກກະພາກ

(ກາຖາມນົກຈັກກະພາກວ່າ)

[໑໓໕] ນົກຈັກກະພາກທ່ານມີສີງາມຮູບງາມລ່ຳສັນ
ເລືອດຝາດດີ ຊວດຊົງງາມ ໃບໜ້າຜ່ອງໃສ

[໑໓໖] ທ່ານຈັບປາຢູ່ແຄມຝັ່ງແມ່ນ້ຳຄົງຄາ
ຄື ປາກ່າ ປາກະບອກ ປາເຊັງ
ປາຄ້າວ ແລະປາວຽນໄຟ ແມ່ນບໍ

(ນົກຈັກກະພາກປະຕິເສດຄຳເວົ້າຂອງການັ້ນວ່າ)

[໑໓໗] ຂ້າພະເຈົ້າບໍ່ໄດ້ກິນອາຫານຊະນິດນີ້ ຫຼືສັດບົກສັດນ້ຳເລີຍ
ນອກສາຈາກສາຫຣ່າຍແລະຈອກແໜ
ສະຫາຍ ສາຫຣ່າຍແລະຈອກແໜນີ້ເປັນອາຫານຂອງຂ້າພະເຈົ້າ

(ກາໄດ້ກ່າວວ່າ)

[໑໓໘] ຂ້າພະເຈົ້າບໍ່ເຊື່ອວ່າ ສາຫຣ່າຍແລະຈອກແໜນີ້
ເປັນອາຫານຂອງນົກຈັກກະພາກ
ສະຫາຍ ແມ່ນຕົວຂ້າພະເຈົ້າກໍຍັງກິນອາຫານທີ່ມີຣົດເຄັມ
ແລະໃສ່ດ້ວຍນ້ຳມັນໃນບ້ານ

[໑໓໙] ເຊິ່ງເປັນອາຫານທີ່ເຂົາປຸງກັນໃນໝູ່ມະນຸດ
ເປັນຂອງສະອາດປົນດ້ວຍຊີ້ນ
ນົກຈັກກະພາກ ແຕ່ສີສັນຂອງຂ້າພະເຈົ້າບໍ່ຄືທ່ານ

(ນົກຈັກກະພາກໄດ້ກ່າວວ່າ)

[໑໔໐] ທ່ານບຽດບຽນໝູ່ມະນຸດ
ຕ້ອງຖ້າແນມເບິ່ງຜູ້ທີ່ຜູກເວນໃນຕົນ
ກິນດ້ວຍຄວາມຫວາດສະດຸ້ງ ຕົກໃຈຢ້ານ
ຍ້ອນເຫດນັ້ນ ສີສັນຂອງທ່ານຈຶ່ງເປັນເຊັ່ນນີ້

[໑໔໑] ກາ ທ່ານເປັນສັດຕູກັບຊາວໂລກທັງປວງ
ໄດ້ກ້ອນເຂົ້າມາດ້ວຍຄວາມຊົ່ວ ບໍ່ເຮັດໃຫ້ຜູ້ອື່ນອີ່ມໜໍາ
ຍ້ອນເຫດນັ້ນ ສີສັນຂອງທ່ານຈຶ່ງເປັນເຊັ່ນນີ້

[໑໔໒] ເພື່ອນ ຂ້າພະເຈົ້າບໍ່ບຽດບຽນເຫຼົ່າສັດທັງປວງ
ມີຄວາມຂວນຂວາຍໜ້ອຍ ບໍ່ຫວາດຣະແວງ
ບໍ່ມີຄວາມເສົ້າໂສກ ບໍ່ມີໄພແຕ່ບ່ອນໃດ ຫາກິນຢູ່

[໑໔໓] ທ່ານນັ້ນຈຶ່ງສ້າງອານຸພາບຂຶ້ນ
ຈຶ່ງເລີກປະພຶດແບບເກົ່າສາ
ທ່ຽວໄປໃນໂລກໂດຍບໍ່ບຽດບຽນ
ຈັກເປັນທີ່ຮັກຂອງຊາວໂລກເໝືອນຢ່າງຂ້າພະເຈົ້າ

[໑໔໔] ຜູ້ໃດບໍ່ຂ້າເອງ ບໍ່ໃຊ້ໃຫ້ຜູ້ອື່ນຂ້າ
ບໍ່ເຮັດຊັບຂອງຜູ້ໃດໃຫ້ເສື່ອມໄປ
ບໍ່ໃຊ້ຜູ້ອື່ນເຮັດຊັບຂອງຜູ້ໃດໃຫ້ເສື່ອມໄປ
ມີຈິດເມດຕາໃນສັດທຸກຈໍາພວກ
ຜູ້ນັ້ນບໍ່ກໍ່ເວນກັບໃຜ ໆ

**ຈັກກະວາກະຊາດົກທີ ໑໓ ຈົບ**

## ໑໔. ພູຣິປັນຍະຊາດົກ (໔໕໒)
## ວ່າດ້ວຍຜູ້ມີປັນຍາກວ້າງຂວາງ

(ພຣະຣາຊາຕັດວ່າ)

[໑໔໕] ທ່ານຜູ້ມີປັນຍາກວ້າງຂວາງ ໄດ້ຍິນວ່າ
ຄໍາທີ່ທ່ານອາຈານເສນະກະກ່າວເປັນຄວາມຈິງ
ຍ້ອນສິຣິ ຄວາມພຽນ ແລະປັນຍາຄຸ້ມຄອງທ່ານ

ຜູ້ຕົກຢູ່ໃນອຳນາດຂອງຄວາມເສື່ອມບໍ່ໄດ້
ທ່ານຈຶ່ງຕ້ອງບໍຣິໂພກກ້ອນເຂົ້າໜຽວທີ່ມີແກງໜ້ອຍ

(ພຣະໂພທິສັດຂາບທູນວ່າ)

[໑໘໖] ເຮົາເມື່ອເພີ່ມພູນຄວາມສຸກດ້ວຍຄວາມລຳບາກ
ພິຈາລະນາເບິ່ງການອັນຄວນບໍ່ຄວນ
ຈຶ່ງຫຼີບຊ່ອນຕາມຄວາມພໍໃຈ
ແຕ່ບໍ່ປິດຊ່ອງທາງແຫ່ງປະໂຫຍດ
ດ້ວຍເຫດນັ້ນ ຈຶ່ງພໍໃຈກິນເຂົ້າໜຽວ

[໑໘໗] ອັນໜຶ່ງ ເຮົາຮູ້ເວລາທີ່ຈະທຳຄວາມພຽນ
ແລະເພີ່ມພູນປະໂຫຍດດ້ວຍປັນຍາທັງຫຼາຍ
ກ້າວຍ່າງເໝືອນຣາດຊະສີ
ແມ່ນຕໍ່ໄປທ່ານກໍຈະເຫັນເຮົາດ້ວຍຄວາມສຳເລັດອັນນັ້ນ

(ພຣະຣາຊາເມື່ອຈະຊົງທົດລອງບັນດິດ ຈຶ່ງຕັດວ່າ)

[໑໘໘] ກໍຄົນພວກໜຶ່ງແມ່ນມີຄວາມສຸກກໍບໍ່ທຳຄວາມຊົ່ວ
ຄົນອີກພວກໜຶ່ງຍ້ອນຢ້ານການກ່ຽວຂ້ອງ
ກັບການຖືກຕິຕຽນຈຶ່ງບໍ່ທຳຄວາມຊົ່ວ
ສ່ວນທ່ານເປັນຜູ້ມີຄວາມຄິດກວ້າງຂວາງຫຼາຍ
ຍ້ອນເຫດໃດ ຈຶ່ງບໍ່ກໍ່ທຸກໃຫ້ແກ່ເຮົາ

(ພຣະໂພທິສັດຂາບທູນວ່າ)

[໑໘໙] ທຳມະດາບັນດິດບໍ່ປະພຶດກຳຊົ່ວຍ້ອນເຫດຄວາມສຸກແຫ່ງຕົນ
ແມ່ນຖືກຄວາມທຸກກະທົບພັ້ງພາດໄປ ກໍສະງົບຢູ່ໄດ້
ບໍ່ລະຖິ້ມທຳ ຍ້ອນຄວາມຮັກແລະຄວາມຊັງ

(ພຣະຣາຊາຕັດມາຍາກະສັດວ່າ)

[໑໙໐] ບຸກຄົນເພິ່ງຍົກຕົນທີ່ຕ່ຳຊ້າຂຶ້ນດ້ວຍເຫດເລັກໜ້ອຍຫຼືຮຸນແຮງ
ແນວໃດແນວໜຶ່ງກ່ອນ ພາຍຫຼັງເພິ່ງປະພຶດທຳ

(ພຣະໂພທິສັດສະແດງອຸປະມາດ້ວຍຕົ້ນໄມ້ວ່າ)

[໑໕໑] ບຸກຄົນນັ່ງກໍຕາມ ນອນກໍຕາມທີ່ຮົ່ມເງົາຕົ້ນໄມ້ໃດ
ບໍ່ຄວນຫັກຮານງ່າຕົ້ນໄມ້ນັ້ນ
ເພາະວ່າຄົນປະທຸດສະຮ້າຍມິດເປັນຄົນຊົ່ວຊາມ

[໑໕໒] ຄົນຜູ້ຮູ້ແຈ້ງທຳແຕ່ສຳນັກອາຈານໃດ
ອັນໜຶ່ງ ການທີ່ສັດຕະບຸຣຸດທັງຫຼາຍກຳຈັດຄວາມສົງໄສຂອງຄົນຜູ້ນັ້ນໄດ້
ນັ້ນແລນັບວ່າເປັນບ່ອນເພິ່ງ ບ່ອນພຳນັກຂອງເຂົາ
ຄົນຜູ້ມີປັນຍາບໍ່ເພິ່ງທຳລາຍໄມຕີກັບອາຈານນັ້ນເລີຍ

(ພຣະໂພທິສັດອະນຸສາດ ພຣະຣາຊາວ່າ)

[໑໕໓] ຄະລຶຫັດຜູ້ບໍຣິໂພກກາມຂີ້ຄ້ານບໍ່ດີ
ບັນພະຊິດບໍ່ສັງລວມບໍ່ດີ
ພຣະຣາຊາບໍ່ຊົງພິຈາຣະນາກ່ອນແລ້ວເຮັດບໍ່ດີ
ການທີ່ບັນດິດໂກດບໍ່ດີ

[໑໕໔] ຂ້າແດ່ ພຣະອົງຜູ້ເປັນເຈົ້າແຫ່ງທິດ
ກະສັດຊົງພິຈາຣະນາກ່ອນແລ້ວຈຶ່ງຄວນເຮັດ
ບໍ່ຊົງພິຈາຣະນາກ່ອນແລ້ວບໍ່ຄວນຕັດສິນ
ຍົດແລະກຽດຍ່ອມຈະເລີນແດ່ ພຣະຣາຊາຜູ້ຊົງພິຈາຣະນາກ່ອນແລ້ວຈຶ່ງເຮັດ

**ພູຣິປັນຍະຊາດົກທີ ໑໔ ຈົບ**

## ໑໕. ມະຫາມັງຄະລະຊາດົກ (໔໕໓)
## ວ່າດ້ວຍມະຫາມຸງຄຸນ

(ສິດຜູ້ເປັນຫົວໜ້າຖາມອາຈານວ່າ)

[໑໕໕] ໃນເວລາຕ້ອງການຄວາມເປັນມຸງຄຸນ ນໍຣະຊົນສູດພຣະເວດອັນໃດ
ນໍຣະຊົນນັ້ນຮຽນພຣະເວດອັນໃດ
ຫຼືບັນດາສຸຕະ ຮຽນສຸຕະບົດໃດ
ແລະເຮັດແນວໃດ ຈຶ່ງໄດ້ຮັບຄວາມຄຸ້ມຄອງໂດຍສະວັດດີພາບ
ທັງໃນໂລກນີ້ແລະໂລກໜ້າ

(ພຣະໂພທິສັດບອກມຸງຄຸນວ່າ)

[໑໕໖] ເທວະດາແລະເທບບິດອນທັງປວງ
ສັດເລືອຄານແລະສັບພະສັດທັງປວງ
ອັນຜູ້ໃດແຜ່ເມດຕາຢູ່ເປັນນິດ
ບັນດິດທັງຫຼາຍກ່າວການແຜ່ເມດຕານັ້ນໃນສັດທັງຫຼາຍວ່າ
ເປັນຄວາມສະວັດສະດີຂອງຜູ້ນັ້ນ

(ພຣະໂພທິສັດກ່າວມຸງຄຸນຕໍ່ໄປອີກວ່າ)

[໑໕໗] ຜູ້ໃດມີຄວາມປະພຶດຖ່ອມຕົນຕໍ່ຊາວໂລກທັງປວງ
ຄື ຕໍ່ຍິງຊາຍທັງຫຼາຍ ພ້ອມທັງເດັກນ້ອຍ
ເປັນຜູ້ອົດທົນຕໍ່ຄຳເວົ້າທີ່ຫຍາບຄາຍ
ບໍ່ກ່າວວາຈາທີ່ຂັດແຍ້ງ
ບັນດິດທັງຫຼາຍກ່າວຄວາມອົດກັ້ນນັ້ນວ່າ
ເປັນຄວາມສະວັດສະດີຂອງຜູ້ນັ້ນ

[໑໕໘] ຜູ້ໃດມີປັນຍາ ມີຄວາມຮູ້ ໃນເມື່ອເຫດເກີດຂຶ້ນ
ບໍ່ດູໝິ່ນມິດສະຫາຍໂດຍສິລະປະ ສະກຸນ ຊັບ ແລະໂດຍຊາດ
ບັນດິດທັງຫຼາຍກ່າວຄວາມບໍ່ດູໝິ່ນນັ້ນໃນສະຫາຍທັງຫຼາຍວ່າ
ເປັນຄວາມສະວັດສະດີຂອງຜູ້ນັ້ນ

[໑໕໙] ຜູ້ໃດເວົ້າຈາບໍ່ຕົວະ ຄົບເພື່ອນດີ
ແລະບໍ່ປະທຸດສະຮ້າຍມິດ
ແບ່ງປັນຊັບຂອງຕົນໃຫ້
ບັນດິດທັງຫຼາຍກ່າວການກະທຳນັ້ນໃນມິດທັງຫຼາຍວ່າ
ເປັນຄວາມສະວັດສະດີຂອງຜູ້ນັ້ນ

[໑໖໐] ຜູ້ໃດມີພັນລະຍາເຊິ່ງມີໄວທໍ່ກັນ ສາມັກຄີກັນ
ໄປຕາມກັນ ເປັນຜູ້ຕ້ອງການທຳ ໃຫ້ກຳເນີດລູກໄດ້
ເປັນຍິງມີສະກຸນ ມີສິນ ມີຄວາມຊື່ສັດ ຈົ່ງຮັກພັກດີຕໍ່ສາມີ
ບັນດິດທັງຫຼາຍກ່າວການປະພຶດນັ້ນໃນພັນລະຍາທັງຫຼາຍວ່າ
ເປັນຄວາມສະວັດສະດີຂອງຜູ້ນັ້ນ

[໑໖໑] ຜູ້ໃດມີພຣະຣາຊາຜູ້ເປັນໃຫຍ່ກວ່າໝູ່ຊົນ ຊົງມີພຣະກຽດຕິຍົດ
ຢັ່ງຮູ້ຄວາມເປັນຜູ້ບໍລິສຸດ ແລະຄວາມພາກພຽນ

ໂດຍປາສະຈາກຄວາມຄາງແຄງພຣະທະໄທວ່າ
ຜູ້ນີ້ເປັນເພື່ອນຮ່ວມໃຈຂອງເຮົາ
ບັນດິດທັງຫຼາຍກ່າວຄວາມບໍ່ຄາງແຄງພຣະທະໄທນັ້ນວ່າ
ເປັນຄວາມສະວັດສະດີຂອງຜູ້ນັ້ນໃນພຣະຣາຊາທັງຫຼາຍ

[໑໖໘] ຜູ້ໃດມີສັດທາ ມີຈິດເຫຼື້ອມໃສ ອະນຸໂມທະນາໃຫ້ເຂົ້ານ້ຳ
ດອກໄມ້ຂອງຫອມ ແລະເຄື່ອງລູບໄລ້ເປັນທານ
ບັນດິດທັງຫຼາຍກ່າວການໃຫ້ທານນັ້ນວ່າ
ເປັນຄວາມສະວັດສະດີຂອງຜູ້ນັ້ນໃນສະຫວັນ

[໑໖໓] ຜູ້ໃດເປັນຜູ້ຄົງແກ່ຮຽນທັງຫຼາຍ
ຜູ້ສຳເລັດດ້ວຍການປະພຶດຖືກເປັນສັດຕະບຸຣຸດ
ໄດ້ຍິນໄດ້ຟັງມາຫຼາຍ ເປັນຜູ້ສະແຫວງຫາຄຸນຄວາມດີ
ມີສີນຊຳຣະລ້າງດ້ວຍທຳຂອງພຣະອະຣິຍະ
ບັນດິດທັງຫຼາຍກ່າວການຊຳຣະລ້າງດ້ວຍທຳຂອງພຣະອະຣິຍະນັ້ນວ່າ
ເປັນຄວາມສະວັດສະດີໃນທ່າມກາງພຣະອະຣະຫັນຂອງຜູ້ນັ້ນ

(ພຣະໂພທິສັດ ລວມຍອດເທດສະໜາດ້ວຍພຣະອະຣະຫັນ ຕັດມະຫາມຸງຄຸນ ໗ ປະການວ່າ)

[໑໖໔] ມຸງຄຸນທັງ ໗ ປະການເຫຼົ່ານີ້ເປັນຄວາມສະວັດສະດີໃນໂລກ
ທີ່ທ່ານຜູ້ຮູ້ສັນເສີນ ມີຄວາມສຸກເປັນກຳໄລ
ຂໍເຊີນນໍຣະຊົນຄົນມີປັນຍາໃນໂລກປະພຶດປະຕິບັດມຸງຄຸນເຫຼົ່ານັ້ນເທີ້ນ
ຍ້ອນໃນມຸງຄຸນທາງໂລກ ບໍ່ມີອັນໃດປະເສີດໄດ້ຢ່າງດຽວ

**ມະຫາມັງຄະລະຊາດົກທີ ໑໕ ຈົບ**

## ໑໖. ຄະຕະປັນທິຕະຊາດົກ (໔໕໔)
## ວ່າດ້ວຍຄະຕະບັນດິດ

(ໂຣຫິເນີຍຍະອຳມາດສົນທະນາກັບພຣະເຈົ້າວາສຸເທບວ່າ)

[໑໖໕] ຂໍເດຊະພຣະເຈົ້າກັນຫະ ໂຜດສະເດັດລຸກຂຶ້ນເທີ້ນ
ຊົງບັນທົມຢູ່ເຮັດຫຍັງ
ພຣະອົງມົວຊົງພຣະສຸບິນຈະມີປະໂຫຍດອັນໃດ

ພຣະກະນິດຖາຜູ້ເປັນດັ່ງດວງພຣະຫະໄທ
ແລະໄນຍະເນດເບື້ອງຂວາຂອງພຣະອົງມິລົມກຳເຣີບ
ຂ້າແດ່ພຣະເຈົ້າເກສະວະ ພຣະເຈົ້າຄະຕະບັນດິດໂອດຄວນຮ້ອງສຽງຫຼົງຢູ່

(ພຣະສາດສະດາຕັດວ່າ)

[໑໖໖] ພຣະເຈົ້າເກສະວະເມື່ອໄດ້ຊົງສະດັບວາຈາຂອງໂຣຫິເນີຍຍະອຳມາດນັ້ນ
ຮີບສະເດັດລຸກຂຶ້ນ ຊົງກະວົນກະວາຍ
ຍ້ອນຄວາມໂສກເຖິງພຣະກະນິດຖາ

(ພຣະຣາຊາຕັດກັບຄະຕະບັນດິດວ່າ)

[໑໖໗] ເຈົ້າຈົ່ມເພີ້ວ່າ ກະຕ່າຍ ກະຕ່າຍ
ໄປທົ່ວພຣະນະຄອນທະວາຣາວະດີນີ້ເໝືອນຄົນບ້າຍ້ອນເຫດໃດ
ໃຜລັກກະຕ່າຍຂອງເຈົ້າໄປ

(ພຣະຣາຊາໄດ້ຕັດອີກວ່າ)

[໑໖໘] ຈະເປັນກະຕ່າຍທີ່ເຮັດດ້ວຍຄຳ ດ້ວຍແກ້ວມະນີ ດ້ວຍໂລຫະ
ຫຼືຈະເປັນກະຕ່າຍທີ່ເຮັດດ້ວຍເງິນ ດ້ວຍຫອຍສັງ
ດ້ວຍສີລາ ດ້ວຍແກ້ວປະພານກໍຕາມ
ອ້າຍຈະໃຫ້ເຂົາເຮັດມອບໃຫ້ເຈົ້າທຸກຢ່າງ

[໑໖໙] ແມ່ນກະຕ່າຍອື່ນ ໆ ທີ່ມີຢູ່ໃນປ່າ ຫາກິນຢູ່ໃນປ່າ
ອ້າຍຈະນຳກະຕ່າຍແມ່ນເຫຼົ່ານັ້ນມາໃຫ້ເຈົ້າ
ກະຕ່າຍຊະນິດໃດນໍທີ່ເຈົ້າປາຖະໜາ

(ຄະຕະບັນດິດຂາບທູນວ່າ)

[໑໗໐] ກະຕ່າຍທັງຫຼາຍບັນດາທີ່ອາໄສຢູ່ເທິງແຜ່ນດິນ
ຂ້ານ້ອຍບໍ່ຕ້ອງການ ຂ້ານ້ອຍຕ້ອງການກະຕ່າຍຈາກດວງຈັນ
ຂໍເດຊະພຣະເຈົ້າເກສະວະ ຂໍພຣະອົງຈົ່ງນຳກະຕ່າຍນັ້ນລົງມາ
ປະທານແກ່ຂ້ານ້ອຍດ້ວຍເທີ້ນ

(ພຣະຣາຊາຕັດວ່າ)

[໑໗໑] ນ້ອງເອີຍ ເຈົ້າປາຖະໜາສິ່ງທີ່ບໍ່ຄວນປາຖະໜາ
ມາຕ້ອງການກະຕ່າຍຈາກດວງຈັນ
ຈັກຕ້ອງລະຖິ້ມຊີວິດອັນເປັນທີ່ຮັກໄປຢ່າງແນ່ນອນ

(ຄະຕະບັນດິດຂາບທູນວ່າ)

[໑໗໒] ຂໍເດຊະພຣະເຈົ້າກັນທະ ພຣະເຈົ້າອ້າຍກໍຊົງຮູ້
ຢ່າງທີ່ຊົງສອນຄົນອື່ນເຂົາ
ແຕ່ເປັນຫຍັງ ພຣະໂອຣົດທີ່ສິ້ນພະຊົນໄປກ່ອນແລ້ວ
ພຣະເຈົ້າອ້າຍຈຶ່ງຍັງຊົງເສົ້າໂສກຮອດຈົນທຸກວັນນີ້ບໍ

(ຄະຕະບັນດິດໄດ້ຂາບທູນຕໍ່ໄປອີກວ່າ)

[໑໗໓] ຖານະອັນໃດທີ່ມະນຸດຫຼືອະມະນຸດບໍ່ຄວນໄດ້
ຄື ລູກຂອງເຮົາທີ່ເກີດມາແລ້ວຂໍຢ່າໄດ້ຕາຍເລີຍ
ຖານະອັນເປັນສິ່ງທີ່ຫາບໍ່ໄດ້
ຈະໄດ້ມາຈາກໃສບໍ

[໑໗໔] ຂໍເດຊະພຣະເຈົ້າກັນທະ ຈະໃຊ້ເວດມົນ ເພສັດຮາກໄມ້
ໂອສົດຕ່າງ ໆ ຫຼືພຣະຣາດຊະຊັບ
ກໍບໍ່ສາມາດຈະພາພຣະຣາດຊະໂອຣົດທີ່ລ່ວງລັບໄປແລ້ວ
ທີ່ພຣະອົງຊົງເສົ້າໂສກເຖິງຢູ່ກັບຄືນມາໄດ້

(ພຣະຣາຊາຊົງສັນເສີນຄະຕະບັນດິດວ່າ)

[໑໗໕] ພຣະຣາຊາຜູ້ມີພວກອຳມາດ
ທີ່ເປັນຄົນສະຫຼຽວສະຫຼາດເໝືອນຄະຕະບັນດິດ
ເຮັດເຮົາໃຫ້ສ່າງຫາຍຈາກຄວາມເສົ້າໂສກໄດ້ໃນວັນນີ້
ຈະມີຄວາມເສົ້າໂສກມາຈາກໃສໄດ້ອີກບໍ?

[໑໗໖] ເຈົ້າຊ່ອຍຣະງັບອ້າຍຜູ້ຮ້ອນຮົນໃຫ້ສະງົບ
ດັບຄວາມກະວົນກະວາຍທັງໝົດໄດ້
ເໝືອນຄົນໃຊ້ນ້ຳທົດດັບໄຟທີ່ໄໝ້ນ້ຳມັນປຽງ

[໑໗໗] ເຈົ້າໄດ້ບັນເທົາຄວາມເສົ້າໂສກຂອງອ້າຍຜູ້ກຳລັງເສົ້າໂສກເຖິງບຸດ

ຊື່ວ່າໄດ້ຊ່ອຍຖອນລູກສອນຄືຄວາມເສົ້າໂສກ
ເຊິ່ງສຽບແທງຫົວໃຈຂອງອ້າຍຂຶ້ນໄດ້ແລ້ວນໍ

[໑໗໘] ພໍ່ຄະຕະບັນດິດ ອ້າຍເຊິ່ງເຈົ້າໄດ້ຊ່ອຍຖອນລູກສອນ
ຄືຄວາມເສົ້າໂສກຂຶ້ນໄດ້ແລ້ວເປັນຜູ້ປາສະຈາກຄວາມເສົ້າໂສກ
ບໍ່ມີຄວາມຂຸ່ນມົວ ຈະບໍ່ເສົ້າໂສກ ບໍ່ຮ້ອງໄຫ້
ເພາະໄດ້ຟັງຄຳຂອງເຈົ້າ

(ພຣະສາດສະດາຕັດຄາຖາສຸດທ້າຍວ່າ)

[໑໗໙] ນໍຣະຊົນທັງຫຼາຍຜູ້ມີປັນຍາຈະເປັນຜູ້ອະນຸເຄາະ
ຍ່ອມທຳໃຫ້ຜູ້ອື່ນປາສະຈາກຄວາມເສົ້າໂສກ
ເໝືອນຄະຕະບັນດິດເຮັດໃຫ້ເຊດຖະພາດາປາສະຈາກຄວາມເສົ້າໂສກ

**ຄະຕະປັນທິຕະຊາດົກທີ ໑໖ ຈົບ**

## ລວມຊາດົກທີ່ມີໃນນິບາດນີ້ ຄື

| | |
|---|---|
| ໑. ຈະຕຸທະວາຣະຊາດົກ | ໒. ກັນທະຊາດົກ |
| ໓. ຈະຕຸໂປສະຖິຍະຊາດົກ | ໔. ສັງຂະຊາດົກ |
| ໕. ຈູລະໂພທິຊາດົກ | ໖. ມັນທັບພະຍະຊາດົກ |
| ໗. ນິໂຄທະຊາດົກ | ໘. ຕັກກະລະຊາດົກ |
| ໙. ມະຫາທຳມະປາລະຊາດົກ | ໑໐. ກຸກກຸຕະຊາດົກ |
| ໑໑. ມັດຖະກຸນທະລີຊາດົກ | ໑໒. ພິລາຣະໂກສິຍະຊາດົກ |
| ໑໓. ຈັກກະວາກະຊາດົກ | ໑໔. ພູຣິປັນຍະຊາດົກ |
| ໑໕. ມະຫາມັງຄະລະຊາດົກ | ໑໖. ຄະຕະປັນທິຕະຊາດົກ |

**ທະສະກະນິບາດ ຈົບ**

# ໑໑. ເອກາທະສະກະນິບາດ

## ໑. ມາຕຸໂປສະກະຊາດົກ (໔໕໕)

### ວ່າດ້ວຍພະຍາຊ້າງລ້ຽງມານດາ

(ມານດາພຣະໂພທິສັດໄດ້ເວົ້າຄໍ່າຄວນວ່າ)

[໑] ເພາະພະຍາຊ້າງເຜືອກນັ້ນຈາກໄປ
ໄມ້ອ້ອຍຊ້າງ ໄມ້ໂມກມັນ ໄມ້ຊ້າງນ້າວ ຫຍ້າງວງຊ້າງ
ເຂົ້າຟ່າງແລະໝາກເດືອຍກໍຈະເລີນງອກງາມ
ອັນໜຶ່ງ ຕົ້ນກັນນິກາທັງຫຼາຍທີ່ຕີນພູກໍອອກດອກບານສະພັ່ງ

[໒] ບໍ່ວ່າຈະເປັນບ້ານ ຫຼືເມືອງໃດກໍຕາມ
ພຣະຣາຊາ ຫຼືຣາດຊະມະຫາອຳມາດຜູ້ມີເຄື່ອງປະດັບຄຳ
ຍ່ອມຈະບຳຣຸງລ້ຽງເຊິ່ງພະຍາຊ້າງ
ທີ່ພຣະເຈົ້າແຜ່ນດິນ ຫຼືພຣະຣາດຊະໂອຣົດຊົງໃຊ້ປະທັບຊົງ
ບໍ່ຄັ່ນຄ້າມອາດຈະສັງຫານສັດຕູໄດ້ດ້ວຍອາຫານ

(ພຣະຣາຊາຊົງຂໍຮ້ອງພະຍາຊ້າງນັ້ນວ່າ)

[໓] ພະຍາຊ້າງຈົ່ງຮັບເອົາອາຫານເທີ້ນ ຢ່າໄດ້ຜ່າຍຜອມເລີຍ
ງານຫຼວງນັ້ນຍັງມີຢູ່ຫຼວງຫຼາຍ ທີ່ທ່ານຈະກະທຳຕໍ່ໄປ

(ພຣະໂພທິສັດຟັງພຣະດຳຣັດນັ້ນແລ້ວຈຶ່ງຂາບທູນວ່າ)

[໔] ນາງຊ້າງນີ້ນັ້ນໜ້າສົງສານຈິງ ຕາບອດ ບໍ່ມີຜູ້ນຳທາງ
ຕີນຄົງຈະສະດຸດກະຕໍດົ້ນຮົນໄປຈົນເຖິງພູເຂົາຈັນໂທຣະນະແນ່ນອນ

(ພຣະຣາຊາຕັດຖາມວ່າ)

[໕] ພະຍາຊ້າງ ນາງຊ້າງຕາບອດບໍ່ມີຜູ້ນຳທາງ
ຕີນສະດຸດກະຕໍດົ້ນຮົນໄປຈົນເຖິງພູເຂົາຈັນໂທຣະນະ
ນາງຊ້າງເຊືອກນັ້ນເປັນອັນໃດກັບເຈົ້າ

(ພຣະໂພທິສັດຂາບທູນວ່າ)

[໖]     ຂໍເດຊະພຣະມະຫາຣາດ  ນາງຊ້າງຕາບອດບໍ່ມີຜູ້ນໍາທາງ
ຕີນສະດຸດກະຕໍດິ້ນຣົນໄປຈົນເຖິງພູເຂົາຈັນໂທຣະນະ
ນາງຊ້າງເຜືອກນັ້ນເປັນມານດາຂອງຂ້າພຣະອົງເອງ

(ພຣະຣາຊາສະດັບເຫດຜົນນັ້ນແລ້ວຈຶ່ງໄດ້ຕັດວ່າ)

[໗]     ທ່ານທັງຫຼາຍຈົ່ງປ່ອຍພະຍາຊ້າງທີ່ລ້ຽງມານດານີ້ໄປ
ຂໍພະຍາຊ້າງຈົ່ງຢູ່ຮ່ວມກັບມານດາແລະພວກຍາດທັງປວງເທີ້ນ

(ພຣະສາດສະດາຕັດຄາຖາຕໍ່ໄປວ່າ)

[໘]     ພະຍາຊ້າງພົ້ນຈາກເຄື່ອງຜູກ
ເຊິ່ງພຣະເຈົ້າກາສີຊົງສັ່ງກັບ
ພັກຢູ່ບຶດໜຶ່ງ  ແລ້ວໄດ້ໄປສູ່ພູ

[໙]     ຕໍ່ແຕ່ນັ້ນມາ ພະຍາຊ້າງໄດ້ໄປສູ່ສະນົວທີ່ມີນໍ້າເຢືອກເຢັນ
ເຊິ່ງພວກຊ້າງອາໄສຢູ່  ໃຊ້ງວງນໍານໍ້າມາພົ່ນຫົດມານດາ

(ມານດາພຣະໂພທິສັດເມື່ອຈະດ່າຈຶ່ງກ່າວວ່າ)

[໑໐]     ຝົນອັນໃດນີ້ບໍ່ດີເລີຍ  ບໍ່ຕົກຕ້ອງຕາມລະດູການ
ລູກຮັກຂອງເຮົາທີ່ຖ້າເບິ່ງແຍງປົນນິບັດເຮົາກໍຫາຍໄປຍ້ອນ

(ພຣະໂພທິສັດເມື່ອຈະປອບໂຍນມານດາຈຶ່ງກ່າວວ່າ)

[໑໑]     ລຸກຂຶ້ນເທີ້ນແມ່  ນອນຢູ່ເຮັດຫຍັງ  ລູກຮັກຂອງແມ່ມາແລ້ວ
ພຣະເຈົ້າກາສີຜູ້ປີຊາຍານ  ມີບໍລິວານຍົດຊົງປ່ອຍລູກມາແລ້ວ

(ມານດາພຣະໂພທິສັດເມື່ອຈະອະນຸໂມທະນາຈຶ່ງກ່າວວ່າ)

[໑໒]     ຂໍພຣະຣາຊາຜູ້ຊົງທະນຸບໍາຣຸງແຄວ້ນກາສີໃຫ້ຈະເລີນຮຸ່ງເຮືອງ
ເຊິ່ງຊົງປ່ອຍລູກຂອງເຮົາຜູ້ປະພຶດອ່ອນນ້ອມ
ຕໍ່ຜູ້ຫຼັກຜູ້ໃຫຍ່ທຸກເມື່ອ
ຂໍຈົ່ງຊົງມີພຣະຊົນມາຍຸຍືນຍາວ

**ມາຕຸໂປສະກະຊາດົກທີ ໑ ຈົບ**

# ๘. ຊຸນຫະຊາດົກ (໔໕໖)
## ວ່າດ້ວຍພຣະເຈົ້າຊຸນຫະ

(ພາມເມື່ອຈະສົນທະນາຈຶ່ງກ່າວຂາບທູນວ່າ)

[໑໓] ຂໍເດຊະພຣະອົງຜູ້ເປັນຈອມຊົນ
ຂໍພຣະອົງຊົງສະດັບວາຈາຂອງຂ້າພຣະອົງ
ຂ້າພຣະອົງມາເຖິງບ່ອນນີ້ຍ້ອນຄວາມປະສົງຢ່າງໜຶ່ງໃນພຣະເຈົ້າຊຸນຫະ
ຂໍເດຊະພຣະອົງຜູ້ປະເສີດກວ່າມະນຸດທັງຫຼາຍ
ບັນດິດທັງຫຼາຍບໍ່ເວົ້າກັບພາມ
ຜູ້ເດີນທາງມາຢືນຖ້າຂໍຢູ່ວ່າ ເພິ່ງໄປຂ້າງໜ້າເທີ້ນ

(ພຣະຣາຊາຊົງສະດັບຄໍາຂອງພາມຈຶ່ງຕັດວ່າ)

[໑໔] ພາມ ເຮົາຟັງຢູ່ ເຮົາຖ້າຢູ່ ເຊີນເວົ້າເທີ້ນ
ທ່ານມາເຖິງບ່ອນນີ້ຍ້ອນປະສົງອັນໃດ
ຫຼືທ່ານປະສົງປະໂຫຍດອັນໃດໃນເຮົາຈຶ່ງມາຮອດບ່ອນນີ້
ເຊີນເວົ້າມາເທີ້ນພາມ

(ພາມແລະພຣະຣາຊາກ່າວໂຕ້ຕອບກັນວ່າ)

[໑໕] ຂໍພຣະອົງຊົງພຣະຣາດຊະທານບ້ານສ່ວຍ ໕ ເຂດ
ສາວໃຊ້ ໑໐໐ ຄົນ ງົວ ໗໐໐ ໂຕ ຄໍາເງິນ ໑,໐໐໐ ແທ່ງ
ພັນລະຍາ ໒ ຄົນທີ່ມີຊາດສະກຸນເໝາະສົມແກ່ຂ້າພຣະອົງ

[໑໖] ພາມ ຕະບະອັນໜ້າສະພຶງຢ້ານຂອງທ່ານມີຢູ່ບໍ
ມົນອັນວິຈິດຂອງທ່ານມີຢູ່ບໍ
ຍັກບາງພວກທີ່ເຊື່ອຟັງທ່ານມີຢູ່ບໍ
ອີກຢ່າງໜຶ່ງ ປະໂຫຍດທີ່ເຮົາໄດ້ເຮັດໄວ້ແລ້ວທ່ານຮູ້ຄັກບໍ

[໑໗] ຕະບະຂອງຂ້າພຣະອົງກໍບໍ່ມີ ແມ່ນມົນກໍບໍ່ມີ
ແມ່ນພວກຍັກບາງເຫຼົ່າທີ່ເຊື່ອຟັງຂ້າພຣະອົງກໍບໍ່ມີ
ເຖິງປະໂຫຍດທີ່ພຣະອົງໄດ້ຊົງກະທໍາໄວ້ແລ້ວ ຂ້າພຣະອົງກໍບໍ່ຮູ້ແຈ້ງ
ພຽງແຕ່ຂ້າພຣະອົງໄດ້ພົບກັບຝ່າພຣະບາດມາກ່ອນເທົ່ານັ້ນ

[๑๗] ເຮົາຮູ້ວ່າ ຄັ້ງນີ້ເປັນການພົບຄັ້ງທຳອິດ
ກ່ອນໜ້ານີ້ເຮົາບໍ່ຮູ້ຈັກທ່ານ
ເຮົາຖາມແລ້ວ ທ່ານຈຶ່ງບອກຄວາມຂໍ້ນີ້ແກ່ເຮົາວ່າ
ເຮົາໄດ້ພົບກັນເມື່ອໃດຫຼືຢູ່ໃສ

[๑๙] ຂໍເດຊະພຣະອົງຜູ້ສົມມຸດຕິເທບ
ເຮົາທັງຫຼາຍໄດ້ພັກຢູ່ທີ່ຕັກກະສິລາ
ໃນເມືອງຂອງພຣະເຈົ້າຄັນທາຣະຣາດອັນໜ້າອອນຊອນ
ໃນສະຖານທີ່ນັ້ນ ໃນເວລາກາງຄືນທີ່ມືດມິດເຮົາໄດ້ກະທົບໄຫຼ່ກັນ

[๔๐] ຂໍເດຊະພຣະອົງຜູ້ເປັນຈອມຊົນ
ເຮົາທັງ ๔ ນັ້ນຢືນຢູ່ກົງນັ້ນ ໄດ້ສົນທະນາຊວນໃຫ້ຣະນຶກເຖິງກັນໃນບ່ອນນັ້ນ
ອັນນັ້ນເປັນການພົບກັນຂອງເຮົາທີ່ນັ້ນເອງ
ຕໍ່ຈາກນັ້ນ ບໍ່ວ່າພາຍຫຼັງຫຼືເມື່ອກ່ອນ
ບໍ່ມີການພົບພໍ້ກັນເລີຍ

[๔๑] ພານ ການສະມາຄົມກັບຄົນດີ
ຍ່ອມມີໃນມະນຸດທັງຫຼາຍເປັນບາງເທື່ອ
ໃນການບາງເວລາບັນດິດທັງຫຼາຍບໍ່ທຳການສະມາຄົມຫຼືສັນຖະວະໄມຕີ
ຫຼືແມ່ນຄຸນຄວາມດີທີ່ເຂົາເຮັດໄວ້ໃນການກ່ອນໃຫ້ເສື່ອມສູນໄປ

[๔๔] ສ່ວນຄົນພານທັງຫຼາຍຍ່ອມກະທຳການສະມາຄົມຫຼືສັນຖະວະໄມຕີ
ຫຼືຄຸນຄວາມດີທີ່ເຮັດໄວ້ໃນການກ່ອນໃຫ້ເສື່ອມສູນໄປແດ່
ຄຸນເປັນຈຳນວນຫຼາຍທີ່ເຮັດໄວ້ໃນຄົນພານທັງຫຼາຍກໍເສື່ອມສູນໄປເອງແດ່
ເປັນຄວາມຈິງ ຄົນພານທັງຫຼາຍເປັນຄົນອະກະຕັນຍູ

[๔๓] ສ່ວນນັກປາດທັງຫຼາຍບໍ່ກະທຳການສະມາຄົມຫຼືສັນຖະວະໄມຕີ
ຫຼືແມ່ນຄຸນຄວາມດີທີ່ເຮັດໄວ້ໃນການກ່ອນໃຫ້ເສື່ອມສູນໄປ
ຄຸນຄວາມດີທີ່ເຮັດໄວ້ໃນນັກປາດທັງຫຼາຍແມ່ນເລັກໜ້ອຍ
ກໍບໍ່ເສື່ອມສະຫຼາຍໄປ
ເປັນຄວາມຈິງ ນັກປາດທັງຫຼາຍເປັນຄົນມີຄວາມກະຕັນຍູດ້ວຍດີ

[๔๔] ເຮົາຈະໃຫ້ບ້ານສ່ວຍແກ່ທ່ານ ๕ ໝູ່ບ້ານ
ສາວໃຊ້ ๑໐໐ ຄົນ ງົວ ๗໐໐ ຕົວ ຄຳເງິນ ๑,໐໐໐ ແທ່ງ
ພັນລະຍາ ๔ ຄົນທີ່ມີຊາດສະກຸນເໝາະສົມແກ່ທ່ານ

[๘๕] ຂໍເດຊະພຣະມະຫາຣາດ ການສະມາຄົມຂອງສັດຕະບຸຣຸດເປັນແນວນີ້
ຂໍເດຊະ ພຣະອົງຜູ້ເປັນໃຫຍ່ແຫ່ງແຄວ້ນກາສີ
ຂ້າພຣະອົງເປັນເໝືອນດວງຈັນທີ່ຫ້ອມລ້ອມດ້ວຍໝູ່ດາວ
ເພາະຂ້າພຣະອົງໄດ້ສະມາຄົມກັບພຣະອົງໃນວັນນີ້

**ຊຸນຫະຊາດົກທີ ๘ ຈົບ**

# ๙. ທຳມະເທວະປຸດຕະຊາດົກ (๔๕๗)
# ວ່າດ້ວຍທຳເທບພະບຸດ

(ທຳເທບພະບຸດເຊີນອະທຳເທບພະບຸດມາແລ້ວກ່າວວ່າ)

[๘๖] ຂ້າພະເຈົ້າເປັນຜູ້ສ້າງຍົດ ເປັນຜູ້ສ້າງບຸນ
ຈົນເປັນທີ່ຊົມເຊີຍຂອງສະມະນະແລະພາມທັງຫຼາຍທຸກເມື່ອ
ອະທຳເທບພະບຸດ ຂ້າພະເຈົ້າເປັນຝ່າຍທຳ
ເປັນຜູ້ທີ່ເທວະດາແລະມະນຸດທັງຫຼາຍບູຊາແລ້ວ
ຈຶ່ງເປັນຜູ້ຄວນແກ່ຫົນທາງ ຂໍທ່ານຈົ່ງໃຫ້ທາງເທີ້ນ

(ອະທຳເທບພະບຸດກ່າວວ່າ)

[๘๗] ຂ້າພະເຈົ້າຂຶ້ນຍານຝ່າຍອະທຳຢ່າງໝັ້ນຄົງ
ບໍ່ໄດ້ຫວາດຫວັ່ນ ເປັນຜູ້ຊົງພະລັງ
ຍ້ອນເຫດໃດ ຂ້າພະເຈົ້ານັ້ນຈະຕ້ອງໃຫ້ທາງ
ທີ່ບໍ່ເຄີຍໃຫ້ແກ່ທ່ານໃນວັນນີ້ນໍ

(ທຳເທບພະບຸດກ່າວວ່າ)

[๘๘] ທຳນັ້ນ ຜາກົດຂຶ້ນກ່ອນ ພາຍຫຼັງອະທຳຈຶ່ງເກີດຂຶ້ນໃນໂລກ
ຂ້າພະເຈົ້າເປັນຜູ້ຈະເລີນທີ່ສຸດ ປະເສີດທີ່ສຸດ ແລະເກົ່າແກ່ກວ່າ
ຍ້ອນເຫດນັ້ນ ຈົ່ງຫຼີກທາງໃຫ້ອ້າຍເທີ້ນ ນ້ອງຊາຍ

(ອະທຳເທບພະບຸດກ່າວວ່າ)

[๘๙] ຂ້າພະເຈົ້າ ຈະບໍ່ໃຫ້ທາງແກ່ທ່ານຍ້ອນການຂໍຮ້ອງ
ຍ້ອນການເຈຣະຈາໄດ້ຖືກຕ້ອງ ຫຼືເພາະເປັນຜູ້ຄວນແກ່ທາງ

ວັນນີ້ເຮົາທັງ ໔ ຈົ່ງຮົບກັນເທີ້ນ
ຜູ້ໃດຊະນະໃນການຮົບ ທາງເປັນຂອງຜູ້ນັ້ນ

(ທຳເທບພະບຸດກ່າວວ່າ)

[໓໐] ຂ້າພະເຈົ້າເປັນຜູ້ຂື້ນຊື່ລືຊາໄປທົ່ວທິດ
ມີພະລັງມະຫາສານ ມີຍົດຫາປະມານບໍ່ໄດ້ ບໍ່ມີຜູ້ເທົ່າທຽມ
ປະກອບດ້ວຍຄຸນທັງປວງ ເປັນຝ່າຍທຳ
ອະທຳເທບພະບຸດ ທ່ານຈະຊະນະໄດ້ແນວໃດ

[໓໑] ຄົນເຂົາໃຊ້ເຫຼັກທີ່ນັ້ນຕີທອງ ບໍ່ແມ່ນໃຊ້ທອງຕີເຫຼັກ
ວັນນີ້ຖ້າອະທຳກຳຈັດທຳໄດ້
ເຫຼັກກໍຈະມີຄ່າເໝືອນຄຳ

[໓໔] ອະທຳເທບພະບຸດ ຖ້າທ່ານມີກຳລັງໃນການຮົບ
ຜູ້ຫຼັກຜູ້ໃຫຍ່ແລະຄູຂອງທ່ານກໍຈະບໍ່ມີ
ຈະດ້ວຍຄວາມພໍໃຈຫຼືບໍ່ພໍໃຈກໍຕາມ
ຂ້າພະເຈົ້າກໍຈະຍອມໃຫ້ທາງແກ່ທ່ານ
ແມ່ນຄຳຫຍາບຄາຍຂອງທ່ານ ຂ້າພະເຈົ້າກໍຍົກໂທດໃຫ້

(ພຣະຜູ້ມີພຣະພາກເຈົ້າເມື່ອຊົງຮູ້ຂໍ້ຄວາມນີ້ຈຶ່ງໄດ້ຕັດວ່າ)

[໓໓] ກໍອະທຳເທບພະບຸດເມື່ອໄດ້ສະດັບຄຳນີ້ແລ້ວ
ກໍລົ້ມຫົວປັກລົງ ຕີນຊີ້ຂຶ້ນ ລຳພຶງລຳພັນຢູ່ວ່າ
ເຮົາຕ້ອງການຈະຕໍ່ສູ້ ຍັງບໍ່ທັນໄດ້ຕໍ່ສູ້
ອະທຳເທບພະບຸດໄດ້ຖືກກຳຈັດແລ້ວດ້ວຍເຫດພຽງເທົ່ານີ້

[໓໔] ທຳເທບພະບຸດຜູ້ມີຂັນຕິເປັນພະລັງຊະນະແລ້ວ
ຂ້າອະທຳເທບພະບຸດຜູ້ມີພະລັງໃນການຮົບໄດ້ແລ້ວ
ເຮັດໃຫ້ຕົກລົງພື້ນ ມີຈິດໃຈຍິນດີ ມີພະລັງກ້າແຂງ
ມີຄວາມບາກບັ່ນຢ່າງແທ້ຈິງຂຶ້ນລົດຂັບໄປຕາມທາງນັ້ນແລ

[໓໕] ຜູ້ໃດບໍ່ຍ້ອງຍໍນັບຖືມານດາບິດາ
ສະມະນະແລະພາມໃນເຮືອນຂອງຕົນ
ຜູ້ເຊັ່ນນັ້ນຫຼັງຈາກຕາຍໄປ ປະຖິ້ມຮ່າງກາຍໄວ້ໃນໂລກນີ້ແລ້ວ
ຍ່ອມຕົກນະຮົກເໝືອນອະທຳເທບພະບຸດລົ້ມຫົວປັກລົງດິນ

[๓๖] ສ່ວນຜູ້ໃດຍ້ອງຍໍນັບຖືມານດາບິດາ
ສະມະນະແລະພາມໃນເຮືອນຂອງຕົນ
ຜູ້ເຊັ່ນນັ້ນຫຼັງຈາກຕາຍໄປປະຖິ້ມຮ່າງກາຍໄວ້ໃນໂລກນີ້ແລ້ວ
ຍ່ອມໄປສູ່ສຸກຄະຕິເໝືອນທຳເທບພະບຸດຂຶ້ນລົດຂັບໄປ

**ທຳມະເທວະປຸດຕະຊາດົກທີ ๓ ຈົບ**

## ๔. ອຸທະຍະຊາດົກ (๔๕๘)
## ວ່າດ້ວຍພຣະເຈົ້າອຸໄທ

(ທ້າວສັກກະເມື່ອຊິງເຈຣະຈາກັບພຣະຣາດຊະທິດາ ຈຶ່ງຕັດວ່າ)

[๓๗] ພຣະນາງຜູ້ຊົງພຣະພູສາສະອາດ ມີພຣະເພົາແນບສະນິດ
ມີພຣະວໍຣະກາຍງາມຫາບ່ອນຕຳໜິບໍ່ໄດ້
ສະເດັດຂຶ້ນສູ່ຜາສາດ ປະທັບນັ່ງຢູ່ພຣະອົງດຽວ
ພຣະນາງຜູ້ມີພຣະເນດງາມພຽງດັ່ງເນດກິນນະຣີ
ເຮົາຂໍອະນຸຍາດພຣະນາງ
ຂໍໃຫ້ເຮົາໄດ້ຢູ່ຮ່ວມກັນສອງຄົນໃນຄືນນີ້ເທີ້ນ

(ລຳດັບນັ້ນ ພຣະຣາດຊະທິດາໄດ້ຕັດວ່າ)

[๓๘] ເມືອງນີ້ມີຄັນຄູຢູ່ລະຫວ່າງລາຍລ້ອມ
ມີປ້ອມປາການແລະຊຸ້ມປະຕູອັນໝັ້ນຄົງ
ມີທະຫານຖືດາບເຝົ້າຣະວັງຮັກສາ
ຍາກທີ່ໃຜ ໆ ຈະເຂົ້າມາໄດ້

[๓๙] ອັນໜຶ່ງ ແມ່ນທະຫານໜຸ່ມ ໆ ກໍບໍ່ກ້າເຂົ້າມາ
ຍ້ອນເຫດໃດນໍ ທ່ານຈຶ່ງຕ້ອງການພົບຂ້າພະເຈົ້າ

(ທ້າວສັກກະຈຶ່ງຕັດວ່າ)

[๔๐] ພຣະນາງຜູ້ເລີໂສມ ເຮົາເປັນເທບພະບຸດ
ເປັນຜູ້ມາຫາພຣະນາງຮອດຕຳໜັກຂອງພຣະນາງ
ຂໍພຣະນາງຈົ່ງພໍພຣະທະໄທໃນຕົວເຮົາດ້ວຍເທີ້ນ
ເຮົາຂໍມອບຖາດຄຳເຊິ່ງມີຫຼຽນຄຳເຕັມຖາດແດ່ພຣະນາງ

(ພຣະຣາດຊະທິດາສະດັບພຣະດຳຣັດນັ້ນແລ້ວຈຶ່ງຕັດວ່າ)

[໔໑] ທ່ານຈະເປັນເທວະດາ ຍັກ ຫຼືມະນຸດກໍຕາມ
ຄົນອື່ນຂ້ານ້ອຍບໍ່ປາຖະໜາ ນອກຈາກພຣະເຈົ້າອຸໄທ
ເທບພະບຸດຜູ້ມີອານຸພາບຫຼາຍ ຂໍພຣະອົງສະເດັດກັບໄປສາເທີ້ນ
ເມື່ອສະເດັດກັບໄປແລ້ວ ຂໍຢ່າໄດ້ສະເດັດກັບມາອີກເລີຍ

(ທ້າວສັກກະຕັດວ່າ)

[໔໒] ພຣະນາງຜູ້ປະກອບດ້ວຍຄວາມມົດຈົດ
ພຣະນາງຢ່າໃຫ້ຄວາມຍິນດີໃນເມຖຸນ
ທີ່ບັນດາສັດຜູ້ບໍຣິໂພກກາມຖືວ່າເປັນຄວາມຍິນດີຊັ້ນຢ້ຽມ
ເຊິ່ງເປັນເຫດໃຫ້ເຫຼົ່າສັດປະພຶດລຸ່ມ ໆ ດອນ ໆ ບໍ່ໝັ້ນຄົງ
ເຮົາຂໍຖວາຍຖາດເງິນເຊິ່ງເຕັມໄປດ້ວຍຄຳແດ່ພຣະນາງ

(ພຣະຣາດຊະທິດາຕັດວ່າ)

[໔໓] ທຳມະດາຊາຍ ເມື່ອຈະໃຫ້ຍິງຍິນຍອມ
ກໍເອົາຊັບມາໃຫ້ຍິງທີ່ຕົນພໍໃຈ
ແຕ່ສຳລັບພຣະເຈົ້າອຸໄທກົງກັນຂ້າມ
ມີສະພາບເໜືອກວ່ານັ້ນເຫັນໄດ້ຄັກ

(ທ້າວສັກກະໄດ້ຕັດວ່າ)

[໔໔] ພຣະນາງຜູ້ມີພຣະວໍຣະກາຍງົດງາມ
ທຳມະດາອາຍຸແລະຜິວພັນຂອງໝູ່ມະນຸດ
ໃນມະນຸດໂລກຍ່ອມຊຸດໂຊມໄປ
ຍ້ອນເຫດນັ້ນ ແມ່ນຊັບກໍລຸດລົງຕາມສະຫວີວັນຂອງພຣະນາງ
ເພາະວັນນີ້ພຣະນາງຊົງຊະຣາກວ່າເມື່ອກ່ອນ
[໔໕] ພຣະຣາດຊະບຸດຜູ້ຊົງຍົດ ເຮົາວິເຄາະເຫັນແນວນີ້ວ່າ
ເມື່ອວັນຄືນລ່ວງໄປ ສະຫວີວັນຂອງພຣະນາງກໍຊຸດໂຊມໄປ
[໔໖] ພຣະຣາດຊະບຸດນາຣີຜູ້ມີປັນຊາ ດ້ວຍໄວນີ້
ພຣະອົງຄວນປະພຶດພົມມະຈັນ
ພຣະອົງຈະມີພຣະສະຫວີວັນງົດງາມຍິ່ງຂຶ້ນ

(ພຣະຣາດຊະທິດາຕັດວ່າ)

[໔໗] ພວກເທບບໍ່ແກ່ຊະຣາເໝືອນມະນຸດບໍ?
ໃນຮ່າງກາຍຂອງພວກເທບບໍ່ມີຮອຍຫ່ຽວຍານບໍ?
ເທບພະບຸດຜູ້ຊົງອານຸພາບຫຼາຍ ຂ້ານ້ອຍຂໍທູນຖາມພຣະອົງ
ຮ່າງກາຍຂອງໝູ່ເທບເປັນແນວໃດນໍ?

(ທ້າວສັກກະຕັດວ່າ)

[໔໘] ພວກເທບບໍ່ແກ່ເຖົ້າເໝືອນມະນຸດ
ໃນຮ່າງກາຍຂອງພວກເທບກໍບໍ່ມີຮອຍຫ່ຽວຍານ
ພວກເທບເຫຼົ່ານັ້ນມີວັນນະອັນເປັນທິບ
ແລະໂພຄະອັນໄພບູນຍິ່ງຂຶ້ນໄປທຸກວັນ

(ພຣະຣາດຊະທິດາຕັດວ່າ)

[໔໙] ໝູ່ຊົນບໍ່ແມ່ນໜ້ອຍໃນໂລກນີ້ຢ້ານອັນໃດນໍ?
ທາງອັນໃດທີ່ທ່ານກ່າວໄວ້ໂດຍລັດທິບໍ່ແມ່ນໜ້ອຍ
ເທບພະບຸດຜູ້ຊົງອານຸພາບຫຼາຍ ຂ້ານ້ອຍຂໍທູນຖາມພຣະອົງ
ບຸກຄົນດຳຣົງຢູ່ໃນທາງໃດຈຶ່ງບໍ່ຕ້ອງຢ້ານປະຣະໂລກ

(ທ້າວສັກກະຕັດວ່າ)

[໕໐] ບຸກຄົນຕັ້ງວາຈາແລະໃຈໄວ້ໂດຍຖືກ
ບໍ່ເຮັດບາບດ້ວຍກາຍ
ເມື່ອຄອບຄອງເຮືອນກໍມີເຂົ້າແລະນ້ຳຫຼາຍເປັນຜູ້ມີສັດທາ
ອ່ອນໂຍນ ຮູ້ຈັກແບ່ງປັນກັນກິນ ຮູ້ຄວາມປະສົງຂອງຜູ້ຂໍ
ເປັນຜູ້ສົງເຄາະ ເວົ້າຜູກໃຈເພື່ອນ ມີວາຈາອ່ອນຫວານ
ດຳຣົງຢູ່ໃນທາງນີ້ ຍ່ອມບໍ່ຕ້ອງຢ້ານປະຣະໂລກ

(ພຣະຣາດຊະທິດາຕັດວ່າ)

[໕໑] ເທບພະບຸດ ພຣະອົງຍ່ອມພ່ຳສອນຂ້ານ້ອຍເໝືອນແມ່ເໝືອນພໍ່
ຂ້ານ້ອຍ ຂໍທູນຖາມພຣະອົງຜູ້ມີວັນນະງົດງາມ
ພຣະອົງຜູ້ມີພຣະວໍຣະກາຍງົດງາມເປັນໃຜກັນນໍ

(ທ້າວສັກກະຕັດວ່າ)

[໕໔] ພຣະນາງຜູ້ເລີໂສມ ເຮົາຄືພຣະເຈົ້າອຸໄທ
ມາໃນທີ່ນີ້ເພາະໄດ້ສັນຍາກັບນາງໄວ້
ເມື່ອເຮົາບອກນາງແລ້ວກໍຈະໄປ
ເຮົາພົ້ນຈາກສັນຍາກັບນາງແລ້ວ

(ພຣະຣາດຊະທິດາຕັດວ່າ)

[໕໓] ຖ້າພຣະອົງເປັນພຣະເຈົ້າອຸໄທແທ້ບໍ
ສະເດັດມາທີ່ນີ້ເພາະມີສັນຍາກັນໄວ້
ຂໍເດຊະພຣະຣາດຊະບຸດ ຂໍພຣະອົງຈົ່ງພ່ຳສອນຂ້ານ້ອຍ
ຕາບເທົ່າທີ່ຈະໄດ້ມາພົບກັນອີກຄັ້ງໜຶ່ງ

(ພຣະໂພທິສັດເມື່ອຈະຊົງສອນ ຈຶ່ງຕັດວ່າ)

[໕໔] ໄວຍ່ອມຜ່ານໄປຢ່າງວ່ອງໄວ ຂະນະເວລາກໍຄືກັນ
ບໍ່ຢຸດຢູ່ກັບທີ່ ສັດທັງຫຼາຍຍ່ອມຕາຍຢ່າງແນ່ນອນ
ສະຣີຣະຮ່າງກາຍບໍ່ຍັ່ງຍືນ ຍ່ອມຈະຊຸດໂຊມໄປ
ແມ່ອຸໄທພັດທະຣາ ທ່ານຈົ່ງຢ່າຜະໝາດ ປະພຶດທຳເທີ້ນ

[໕໕] ແຜ່ນດິນທັງໝົດເຕັມໄປດ້ວຍຊັບ
ເພິ່ງເປັນຂອງພຣະຣາຊາຜູ້ດຽວທໍ່ນັ້ນ ບໍ່ເພິ່ງຕົກຢູ່ໃນອຳນາດຂອງຜູ້ອື່ນ
ບຸກຄົນຜູ້ຍັງບໍ່ປາສະຈາກຣາຄະ ກໍຍ່ອມຈະລະຖິ້ມຊັບແນ່ນນັ້ນໄປ
ແມ່ອຸໄທພັດທະຣາ ທ່ານຈົ່ງຢ່າຜະໝາດ ປະພຶດທຳເທີ້ນ

[໕໖] ມານດາ ບິດາ ອ້າຍນ້ອງທັງຫຼາຍ ແມ່ນພັນລະຍາສິນໄຖ່ກໍດີ
ແມ່ນຊົນເຫຼົ່ານັ້ນກໍຈະຕ້ອງພັດພາກຈາກກັນແລະກັນໄປ
ແມ່ອຸໄທພັດທະຣາ ທ່ານຈົ່ງຢ່າຜະໝາດ ປະພຶດທຳເທີ້ນ

[໕໗] ແມ່ອຸໄທພັດທະຣາ ທ່ານຮູ້ວ່າຮ່າງກາຍເປັນອາຫານຂອງສັດອື່ນ
ຮູ້ວ່າສຸກຄະຕິແລະທຸກຄະຕິໃນສັງສາຣະວັດເປັນສະພາບທີ່ຢູ່ອັນຕ່ຳຕ້ອຍແລ້ວ
ຈົ່ງຢ່າຜະໝາດ ປະພຶດທຳເທີ້ນ

(ພຣະຣາດຊະທິດາເຫຼື້ອມໃສແລ້ວເມື່ອຈະຊົງຊົມເຊີຍ ຈຶ່ງຕັດຄາຖາສຸດທ້າຍວ່າ)

[໕໗] ເທບພະບຸດນີ້ຕັດດີແລ້ວ ຊີວິດຂອງສັດທັງຫຼາຍມີໜ້ອຍ
ແລະຊີວິດນັ້ນລຳບາກ ຢູ່ໄດ້ບໍ່ດົນ ປະກອບໄປດ້ວຍທຸກ
ຂ້ານ້ອຍຈະລະຖິ້ມເມືອງສຸຣຸນທະນະແຄວ້ນກາສີໄປບວດຄົນດຽວ

**ອຸທະຍະຊາດົກທີ ໔ ຈົບ**

## ໕. ປານີຍະຊາດົກ (໔໕໙)

## ວ່າດ້ວຍການຮັງກຽດບາບ ຍ້ອນເຜີໄປດື່ມນ້ຳ

(ພຣະປັດເຈກພຸດທະເຈົ້າເມື່ອຈະຖວາຍພຣະພອນແກ່ພຣະຣາຊາ ຈຶ່ງໄດ້ຕັດວ່າ)

[໕໙] ອາດຕະມາເປັນມິດຂອງຊາຍຄົນໜຶ່ງໄດ້ດື່ມນ້ຳຂອງມິດທີ່ເຂົາບໍ່ໄດ້ໃຫ້
ເຫດນັ້ນ ພາຍຫຼັງຈຶ່ງຮັງກຽດວ່າ ນັ້ນເປັນຄວາມຊົ່ວເຮົາໄດ້ເຮັດແລ້ວ
ເຮົາຢ່າໄດ້ເຮັດຄວາມຊົ່ວອີກເລີຍ

ຍ້ອນເຫດນັ້ນ ອາດຕະມາຈຶ່ງບວດ (໑)

[໖໐] ກໍອາດຕະມາເຫັນພັນລະຍາຂອງຄົນອື່ນແລ້ວເກີດຄວາມຮັກ
ເຫດນັ້ນ ພາຍຫຼັງຈຶ່ງຮັງກຽດວ່າ ນັ້ນເປັນຄວາມຊົ່ວເຮົາໄດ້ເຮັດແລ້ວ
ເຮົາຢ່າໄດ້ເຮັດຄວາມຊົ່ວອີກເລີຍ

ຍ້ອນເຫດນັ້ນ ອາດຕະມາຈຶ່ງບວດ (໒)

[໖໑] ຂໍຖວາຍພຣະພອນມະຫາບໍພິດ
ພວກໂຈນໃນປ່າໄດ້ຈັບບິດາກັບອາດຕະມາ
ອາດຕະມາຮູ້ຢູ່ຖືກພວກໂຈນເຫຼົ່ານັ້ນຖາມ
ກໍໄດ້ຕອບເລື້ອງນັ້ນເປັນຢ່າງອື່ນໄປ
[໖໒] ເຫດນັ້ນ ພາຍຫຼັງຈຶ່ງຮັງກຽດວ່າ
ນັ້ນເປັນຄວາມຊົ່ວເຮົາໄດ້ເຮັດແລ້ວ
ເຮົາຢ່າໄດ້ເຮັດຄວາມຊົ່ວອີກເລີຍ

ຍ້ອນເຫດນັ້ນ ອາດຕະມາຈຶ່ງບວດ (໓)

[໖໓] ເມື່ອເຂົາຕັ້ງພິທີບູຊາຍັນຊື່ໂສມະຍາຄະ
ພວກມະນຸດໄດ້ທຳປານາຕິບາດ
ອາດຕະມາໄດ້ຍິນຍອມອະນຸຍາດໃຫ້ແກ່ພວກເຂົາ

[໖໔] ເຫດນັ້ນ ພາຍຫຼັງຈຶ່ງຮັງກຽດວ່າ
ນັ້ນເປັນຄວາມຊົ່ວເຮົາໄດ້ເຮັດແລ້ວ
ເຮົາຢ່າໄດ້ເຮັດຄວາມຊົ່ວອີກເລີຍ

ຍ້ອນເຫດນັ້ນ ອາດຕະມາຈຶ່ງບວດ (໔)

[໖໕] ເມື່ອກ່ອນ ຊົນທັງຫຼາຍໃນບ້ານຂອງອາດຕະມາ
ໄດ້ສຳຄັນສຸຣາແລະເມໄຣວ່າເປັນນ້ຳຫວານ
ໄດ້ປຸງນ້ຳເມົາເພື່ອຄວາມຫາຍຍານະແກ່ຊົນຈຳນວນຫຼາຍ
ອາດຕະມາໄດ້ຍິນຍອມອະນຸຍາດໃຫ້ແກ່ພວກເຂົາ

[໖໖] ເຫດນັ້ນ ພາຍຫຼັງຈຶ່ງຮັງກຽດວ່າ
ນັ້ນເປັນຄວາມຊົ່ວເຮົາໄດ້ເຮັດແລ້ວ
ເຮົາຢ່າໄດ້ເຮັດຄວາມຊົ່ວອີກເລີຍ
ຍ້ອນເຫດນັ້ນ ອາດຕະມາຈຶ່ງບວດ (໕)

(ພຣະຣາຊາຊົງຕິຕຽນກາມວ່າ)

[໖໗] ໜ້າຕິຕຽນແທ້ ກາມເປັນຈຳນວນຫຼາຍມີກິ່ນເໝັນ
ມີຂວາກໜາມຫຼາຍ ທີ່ເຮົາມັກເສບຢູ່
ແຕ່ກໍ່ຍັງບໍ່ໄດ້ຮັບຄວາມສຸກສົມຄວາມປາຖະໜາເລີຍ

(ພຣະອັກຄະຣະມະເຫສີຊົງສັນເສີນຄວາມສຸກໃນກາມວ່າ)

[໖໘] ກາມທັງຫຼາຍໜ້າພໍໃຈຫຼາຍ ມີຄວາມສຸກ
ສຸກທີ່ຍິ່ງກວ່າກາມບໍ່ມີ ຄົນຜູ້ມັກເສບກາມຍ່ອມຂຶ້ນສະຫວັນ

(ພຣະໂພທິສັດຕິຕຽນກາມວ່າ)

[໖໙] ກາມທັງຫຼາຍໜ້າຍິນດີໜ້ອຍມີທຸກຫຼາຍ
ທຸກທີ່ຍິ່ງກວ່າກາມບໍ່ມີ
ຄົນຜູ້ມັກເສບກາມຍ່ອມຕົກນະຮົກ

[໗໐] ກາມທັງຫຼາຍມີທຸກຫຼາຍກວ່າການໃຊ້ດາບທີ່ຝົນດີແລ້ວຟັນ
ໃຊ້ມີດທີ່ແຊ່ດ້ວຍນ້ຳມັນຮ້ອນແທງ ແລະໃຊ້ຫອກແທງປັກໃສ່ເອິກ

[๓๑]　　ການທັງຫຼາຍມີທຸກຫຼາຍກວ່າການຖືກຝັງໃນຂຸມຖ່ານໄຟ
ທີ່ລຸກຮ້ອນເລີກເກີນຊົ່ວຄົນແລ້ວໃຊ້ຜານທີ່ເຜົາຮ້ອນໄຖຢູ່ເນີດນີ້

[๓๔]　　ການທັງຫຼາຍມີທຸກຫຼາຍກວ່າການດື່ມຢາພິດທີ່ຮ້າຍແຮງ
ກວ່າການໃຊ້ນ້ຳມັນທີ່ເດືອດພົດຣາດໃສ່
ຮ້ອນກວ່າການຕົກກະທະທອງແດງທີ່ກຳລັງລະລາຍ

**ປານີຍະຊາດົກທີ ๕ ຈົບ**

## ๖. ຍຸທັນຊະຍະຊາດົກ (๔๖๐)
## ວ່າດ້ວຍພຣະຣາດຊະກຸມານຍຸທັນໄຊ

(ພຣະໂພທິສັດທູນຂໍບັນພະຊາວ່າ)

[๓๓]　　ຂໍເດຊະພຣະມະຫາຣາດ ຂ້າພຣະອົງຂໍຖວາຍບັງຄົມພຣະອົງ
ຜູ້ຊົງເປັນຈອມທັບ ເຊິ່ງແວດລ້ອມໄປດ້ວຍມິດແລະອຳມາດ
ຂ້າພຣະອົງຈັກບວດ ຂໍພຣະອົງຜູ້ສົມມຸດຕິເທບ
ໂຜດພຣະຣາດຊະທານການບວດນັ້ນແກ່ຂ້າພຣະອົງດ້ວຍເທີ້ນ

(ພຣະຣາຊາຕັດຫ້າມວ່າ)

[๓๔]　　ຖ້າເຈົ້າຍັງມີຄວາມຂາດດ້ວຍການທັງຫຼາຍ
ພໍ່ຈະຕື່ມໃຫ້ແກ່ເຈົ້າ
ພໍ່ຈະຫ້າມຄົນທີ່ບຽດບຽນເຈົ້າ
ລູກຍຸທັນໄຊຢ່າບວດເລີຍ

(ພຣະໂພທິສັດກຸມານຂາບທູນວ່າ)

[๓๕]　　ຂ້າພຣະອົງບໍ່ມີຄວາມຂາດດ້ວຍການທັງຫຼາຍ
ຄົນທີ່ບຽດບຽນຂ້າພຣະອົງກໍບໍ່ມີ
ແຕ່ຂ້າພຣະອົງປາຖະໜາຈະທຳທີ່ເພິ່ງເຊິ່ງຊະຣາກຳຈັດບໍ່ໄດ້

(ພຣະສາດສະດາປະກາດຂໍ້ຄວາມນັ້ນວ່າ)

[๓๖]　　ພຣະຣາດຊະບຸດທູນວິງວອນພຣະຣາດຊະບິດາ
ແລະພຣະຣາດຊະບິດາກໍຊົງວິງວອນບຸດ

ຊາວນິຄົມກໍທູນວິງວອນວ່າ ຍຸທັນໄຊກຸມານ
ຢ່າອອກບວດເລີຍ ທ້າວເອີຍ

(ພຣະໂພທິສັດກຸມານຂາບທູນວ່າ)

[໗໗] ຂ້າແດ່ພຣະອົງຜູ້ຊົງເປັນຈອມທັບ
ພຣະອົງໂຜດຢ່າຊົງຫ້າມຂ້າພຣະອົງຜູ້ຈະບວດເລີຍ
ຂໍຂ້າພຣະອົງຢ່າໄດ້ຊື່ວ່າ ເປັນຜູ້ຜະໝາດຍ້ອນການທັງຫຼາຍ
ຢ່າຕົກຢູ່ໃນອຳນາດຂອງຊະຣາເລີຍ

(ພຣະມານດາຕັດວ່າ)

[໗໘] ລູກເອີຍ ແມ່ຂໍຮ້ອງລູກ ຂໍຫ້າມລູກ
ແມ່ຕ້ອງການເຫັນລູກດົນ ໆ ລູກຍຸທັນໄຊ ຢ່າອອກບວດເລີຍ

(ພຣະໂພທິສັດກຸມານຂາບທູນວ່າ)

[໗໙] ອາຍຸຂອງມະນຸດທັງຫຼາຍເໝືອນນ້ຳຄ້າງທີ່ຍອດຫຍ້າ
ເມື່ອພຣະອາທິດຂຶ້ນກໍແຫ້ງໄປ
ທ່ານແມ່ ພຣະອົງຢ່າຊົງຫ້າມລູກເລີຍ

(ພຣະໂພທິສັດທູນເຊີນພຣະຣາດຊະບິດາມາແລ້ວຂາບທູນວ່າ)

[໘໐] ຂໍເດຊະພຣະອົງຜູ້ຊົງເປັນຈອມທັບ
ຂໍຊົງໃຫ້ຣາດຊະບຸຣຸດຮີບເຊີນສະເດັດ
ພຣະຣາດຊະມານດານີ້ຂຶ້ນພຣະຣາດຊະຍານເທີ້ນ
ຂໍພຣະຣາດຊະມານດາຢ່າຊົງເຮັດອັນຕະລາຍແກ່ຂ້າພຣະອົງ
ຜູ້ກຳລັງຈະຂ້າມທາງທີ່ກັນດານເລີຍ

(ພຣະເທວີຊົງຄ່ຳຄວນຢູ່ວ່າ)

[໘໑] ຮີບໄປຂາບທູນວ່າ ຂໍພຣະອົງຊົງພຣະຈະເລີນ
ຣຳມະນະຄອນຈະເປັນເມືອງຮ້າງ
ຖ້າພຣະເຈົ້າສັບພະທັດຊົງອະນຸຍາດ
ໃຫ້ຍຸທັນໄຊຣາດຊະບຸດອອກບວດແລ້ວ

[໙໔] ພຣະຣາດຊະກຸມານພຣະອົງໃດ
ປະເສີດກວ່າພຣະຣາດຊະບຸດພັນພຣະອົງ
ຍັງຊົງພຣະເຍົາ ມີພຣະສະຫວີວັນປານດັ່ງຄໍາ
ພຣະຣາດຊະກຸມານພຣະອົງນີ້ນັ້ນຍັງຊົງມີພຣະກໍາລັງແຂງແຮງ
ຊົງນຸ່ງຫົ່ມຜ້າກາສາວະພັດອອກບວດແລ້ວ

(ພຣະໂພທິສັດກຸມານຂາບທູນວ່າ)

[໙໓] ພຣະຣາດຊະກຸມານທັງ ໘ ພຣະອົງ ຄື ຍຸທັນໄຊກຸມານ
ແລະຍຸທິດຖິລະກຸມານຊົງລະພຣະຣາດຊະມານດາແລະພຣະຣາດຊະບິດາ
ຕັດເຄື່ອງຂ້ອງຂອງຄວາມຕາຍອອກບວດແລ້ວ

**ຍຸທັນຊະຍະຊາດົກທີ ໖ ຈົບ**

## ໗. ທະສະຣະຖະຊາດົກ (໔໖໑)
## ວ່າດ້ວຍພຣະເຈົ້າທະສະຣະຖະ

(ພຣະຣາມບັນດິດກ່າວວ່າ)

[໙໔] ມານີ້ ພໍ່ລັກແລະແມ່ສີດາ ເຈົ້າທັງ ໘ ຈົ່ງລົງນໍ້າ
ນ້ອງພະຣະຕະນີ້ກ່າວຢ່າງນີ້ວ່າ
ພຣະເຈົ້າທະສະຣະຖະສະຫວັນນະຄົດແລ້ວ

(ພະຣະຕະກຸມານຖາມຣາມະບັນດິດວ່າ)

[໙໕] ເຈົ້າອ້າຍຣາມະ ເພາະອານຸພາບອັນໃດ
ເຈົ້າອ້າຍຈຶ່ງບໍ່ຊົງເສົ້າໂສກເຖິງເຫດທີ່ຄວນເສົ້າໂສກ
ຄວາມທຸກຈຶ່ງບໍ່ຄອບງໍາເຈົ້າອ້າຍ
ເພາະຊົງສະດັບວ່າ ພຣະບິດາສະຫວັນນະຄົດແລ້ວ

(ພຣະຣາມບັນດິດປະກາດຄວາມບໍ່ທ່ຽງວ່າ)

[໙໖] ບັນດາຄົນທັງຫຼາຍຜູ້ຮ້ອງໄຫ້ເຖິງຜູ້ທີ່ລ່ວງລັບໄປແລ້ວຢູ່ເປັນຈໍານວນຫຼາຍ
ແຕ່ກໍບໍ່ມີຈັກຄົນໜຶ່ງທີ່ສາມາດຈະຮັກສາຊີວິດຂອງຕົນເອງໄວ້ໄດ້
ວິນຍູຊົນຄົນມີປັນຍາຈະເພີ່ງຍັງຕົນໃຫ້ເດືອດຮ້ອນເຮັດຫຍັງນໍ?

[๗๗] เพาะว่าคนหนุ่ม คนแก่ คนโง่ คนสะหลาด
คนมั่งคั่งล้ำลวย คนจนกำตาม ล้วนจะต้องตายกันทั้งหมด

[๗๘] สัดทั้งหลายที่เกิดมาแล้วมีไพต้องตายกันย่างแน่นอน
เหมือนหมากไม้สุกมีอันตะลายต้องหล่นลงจากต้น

[๗๙] ชนเป็นจำนวนหลาย บางพวกเห็นกันเมื่อตอนเช้า
ในตอนค่ำกับบ่เห็น
บางพวกเห็นกันในตอนค่ำ พ่อรุ่งเช้ามากับบ่เห็น

[๘๐] หากผู้ที่หลงค่ำครวญเบียดเบียนตนอยู่
จะเพิ่งนำประโยชด์อันใดมาได้แน่
บันดิดผู้มีปันยาเห็นปะจักกำจะเพิ่งรู้แนวนั้น

[๘๑] ผู้ที่เบียดเบียนตนเองย่อมจะจ่อยแห้ง
บ่ผ่องใสย้อนการค่ำครวญนั้น
สัดทั้งหลายผู้ละไปสู่ปะระโลกกำคุ้มครองตนบ่ได้
การค่ำครวญเป็นสิ่งที่ขาดปะโยชด์

[๘๒] ในบ่อนพักอาไสที่ร้อน บุกคนเพิ่งใช้น้ำดับได้สันใด
ข้ออุปะไมกำสันนั้น ความเส้าโสกที่เกิดขึ้นแล้ว
นักปราชคนผู้เป็นปาดมีการสะดับฟัง มีปันยา เป็นบันดิด
เพิ่งกำจัดโดยทันทีเหมือนลมพัดนุ่น

[๘๓] สัดย่อมตายคนดียว เกิดกำคนดียวในสะกุน
ส่วนการคบหากันของสับพะสัดมีความก่ຽวข้องกันเป็นย่างยิ่ง

[๘๔] ย้อนเหดนั้นแล นักปาดผู้เป็นพะหูสูด
พิจาละนาโลกนี้และโลกหน้า ย้อนรู้ทั่วเถิงทำ
แม่นความเส้าโสกใหย่หลวงกำแผดเผาจิดใจบ่ได้

[๘๕] เฮานั้นจักให้ จักบํริโพก จักล้ຽงดูยาดทั้งหลาย
และจักคุ้มครองมะหาชนที่เหลือ นั้นเป็นหน้าที่ของท่านผู้รู้

[๘๖] พระรามะบันดิดผู้มีพระสำงามดั่งคำ มีพระพาหาใหย่

ໄດ້ຊົງຄອບຄອງຣາດຊະສົມບັດຢູ່ ໑໖,໐໐໐ ປີ

**ທະສະຣະຖະຊາດົກທີ ໗ ຈົບ**

## ๗. ສັງວະຣະຊາດົກ (๔๖๘)
## ວ່າດ້ວຍພຣະເຈົ້າສັງວະຣະ

(ພຣະອຸໂປສົດກຸມານຕັດກັບສັງວະຣະກຸມານວ່າ)

[๙๗] ຂໍເດຊະພຣະມະຫາຣາດ ພຣະຣາດຊະບິດາຜູ້ເປັນພຣະມະຫາກະສັດ
ຊົງຮູ້ຢູ່ເຖິງສິນຂໍ້ວັດຂອງພຣະອົງ ຊົງຍ້ອງຍໍພຣະກຸມານເຫຼົ່ານີ້
ແຕ່ບໍ່ຍ້ອງຍໍພຣະອົງດ້ວຍຊົນນະບົດໃດຊົນນະບົດໜຶ່ງ

[๙๘] ເມື່ອພຣະມະຫາຣາດຜູ້ສົມມຸດຕິເທບຊົງພະຊົນຢູ່
ຫຼືທິວົງຄົດແລ້ວກໍຕາມ
ພຣະຍາດທັງຫຼາຍເມື່ອເຫັນປະໂຫຍດຂອງຕົນ
ຈຶ່ງພາກັນຍອມຮັບພຣະອົງ

[๙๙] ຂໍເດຊະພຣະເຈົ້າສັງວະຣະ ດ້ວຍພຣະຈະຣິຍາວັດອັນໃດ
ພຣະອົງຈຶ່ງຊົງດໍາຣົງຢູ່ເໜືອພຣະເຈົ້າອ້າຍຜູ້ມີພຣະຊາດສະເໝີກັນ
ຍ້ອນເຫດໃດ ບັນດາພຣະຍາດທີ່ມາປະຊຸມກັນແລ້ວ
ຈຶ່ງບໍ່ລ່ວງເກີນພຣະອົງ

(ພຣະເຈົ້າສັງວະຣະມະຫາຣາດຕັດຄຸນຂອງພຣະອົງວ່າ)

[๑๐๐] ພຣະຣາດຊະບຸດ ເຮົາບໍ່ຣິດສະຫຍາສະມະນະທັງຫຼາຍ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຍ່ອມນອບນ້ອມສະມະນະເຫຼົ່ານັ້ນໂດຍເຄົາລົບ
ຍ່ອມຂາບຕີນສະມະນະຜູ້ຄົງທີ່ທັງຫຼາຍ

[๑๐๑] ສະມະນະເຫຼົ່ານັ້ນຍ່ອມພໍ່າສອນເຮົາ
ຜູ້ປະກອບແລ້ວໃນພຣະທໍາມະຄຸນ ມີສັດທາ
ບໍ່ຣິດສະຫຍາສະມະນະຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ທັງຫຼາຍ
ຍິນດີແລ້ວໃນພຣະທໍາມະຄຸນ

[໑໐໔] ເຮົາໄດ້ສະດັບຄຳຂອງສະມະນະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ເຫຼົ່ານັ້ນແລ້ວ ບໍ່ດູໝິ່ນຜູ້ໃດ
ໃຈຂອງເຮົາຍິນດີໃນທຳເປັນນິດ

[໑໐໓] ພົນຊ້າງ ຣາຊະອົງຄະລັກ ພົນລົດ ພົນຣາບ
ພົນເຫຼົ່ານັ້ນເຮົາກໍບໍ່ຕັດເບັ້ຍລ້ຽງ
ແລະຣາຍໄດ້ປະຈຳທີ່ໄດ້ຕັ້ງໄວ້

[໑໐໔] ອັນໜຶ່ງ ເຮົາມີມະຫາອຳມາດແລະມົນຕຣີຜູ້ຖ້າຮັບໃຊ້ຊ່ອຍຈັດການ
ເມືອງພາຣານະສີໃຫ້ມີມັງສາຫານ ສຸຣາ ແລະເຂົ້ານ້ຳຈຳນວນຫຼາຍ

[໑໐໕] ອັນໜຶ່ງ ແມ່ນພໍ່ຄ້າທັງຫຼາຍທີ່ມາຈາກແຄວ້ນຕ່າງ ໆ ກໍພາກັນລົ້ນລວຍ
ເຮົາກໍຈັດການຄຸ້ມຄອງພໍ່ຄ້າເຫຼົ່ານັ້ນ
ຂ້າແດ່ພຣະພາດາອຸໂບສົຖ ຂໍພຣະອົງຊົງຮູ້ແນວນີ້ເທີ້ນ

(ພຣະອຸໂບສົດກຸມານໄດ້ສະດັບດັ່ງນັ້ນແລ້ວ ຈຶ່ງຕັດວ່າ)

[໑໐໖] ຂໍເດຊະພຣະເຈົ້າສັງວະຣະ ໄນຍະວ່າ
ຂໍພຣະອົງຈົ່ງຄອງຣາດຊະສົມບັດໂດຍທຳ
ແທນພຣະຍາດທັງຫຼາຍ
ອັນໜຶ່ງ ຂໍພຣະອົງຜູ້ມີພຣະປັນຍາແລະຊົງເປັນບັນດິດ
ເກື້ອກູນແກ່ພຣະຍາດທັງຫຼາຍເທີ້ນ

[໑໐໗] ພຣະອົງຜູ້ອັນພຣະຍາດແວດລ້ອມແລ້ວແນວນີ້
ທັງໄດ້ສັ່ງສົມຣັດຕະນະຕ່າງ ໆ ໄວ້ຫຼວງຫຼາຍ
ສັດຕູທັງຫຼາຍຍ່ອມຂົ່ມເຫງບໍ່ໄດ້
ເໝືອນກັບພຣະອິນທີ່ຈອມອະສູນຣາວີບໍ່ໄດ້

**ສັງວະຣະຊາດົກທີ ໙ ຈົບ**

## ໙. ສຸບປາຣະກະຊາດົກ (໔໖໓)
## ວ່າດ້ວຍພໍ່ຄ້າສຸບປາຣະກະ

(ພວກພໍ່ຄ້າກ່າວວ່າ)

[໑໐໘] ມະນຸດທັງຫຼາຍມີດັງແຫຼມ ຍ່ອມໂປ່ໂລ່ຂຶ້ນ ມຸດລົງ
ທ່ານສຸບປານະກະ ພວກເຮົາຂໍຖາມ ທະເລນີ້ຊື່ອັນໃດ

(ພຣະໂພທິສັດກ່າວວ່າ)

[໑໐໙] ເມື່ອເຮືອຂອງພວກທ່ານຜູ້ເປັນພໍ່ຄ້າສະແຫວງຫາຊັບ
ອອກໄປຈາກທ່າພະຣຸກັດສາ ແລ່ນໄປຜິດທິດທາງ
ທະເລນີ້ເຂົາຮຽກວ່າ ຂຸຣະມາລີ

(ພວກພໍ່ຄ້າຖາມພຣະໂພທິສັດວ່າ)

[໑໑໐] ທະເລຜາກົດເໝືອນກອງໄຟແລະດວງອາທິດ
ທ່ານສຸບປາຣະກະ ພວກເຮົາຂໍຖາມ ທະເລນີ້ຊື່ອັນໃດ

(ພຣະໂພທິສັດກ່າວແກ່ພວກພໍ່ຄ້ານັ້ນວ່າ)

[໑໑໑] ເມື່ອເຮືອຂອງພວກທ່ານຜູ້ເປັນພໍ່ຄ້າສະແຫວງຫາຊັບ
ອອກໄປຈາກທ່າພະຣຸກັດສາ ແລ່ນໄປຜິດທິດທາງ
ທະເລນີ້ເຂົາຮຽກວ່າ ອັກຄິມາລີ

(ພວກພໍ່ຄ້າຖາມວ່າ)

[໑໑໒] ທະເລຜາກົດເໝືອນນົມສົ້ມແລະນົມສົດ
ທ່ານສຸບປາຣະກະ ພວກເຮົາຂໍຖາມ ທະເລນີ້ຊື່ອັນໃດ

(ພຣະໂພທິສັດຕອບວ່າ)

[໑໑໓] ເມື່ອເຮືອຂອງພວກທ່ານຜູ້ເປັນພໍ່ຄ້າສະແຫວງຫາຊັບ
ອອກໄປຈາກທ່າພະຣຸກັດສາ ແລ່ນໄປຜິດທິດທາງ
ທະເລນີ້ເຂົາຮຽກວ່າ ທະທິມາລີ

(ພວກພໍ່ຄ້າຖາມວ່າ)

[໑໑໔] ທະເລຜາກົດເໝືອນຫຍ້າຄາແລະເຂົ້າກ້າ
ທ່ານສຸບປາຣະກະ ພວກເຮົາຂໍຖາມ ທະເລນີ້ຊື່ອັນໃດ

(ພຣະໂພທິສັດຕອບວ່າ)

[໑໑໕] ເມື່ອເຮືອຂອງພວກທ່ານຜູ້ເປັນພໍ່ຄ້າສະແຫວງຫາຊັບ
ອອກໄປຈາກທ່າພະຣຸກັດສາ ແລ່ນໄປຜິດທິດທາງ
ທະເລນີ້ເຂົາຮຽກວ່າ ກຸສະມາລີ

(ພວກພໍ່ຄ້າຖາມວ່າ)

[໑໑໖] ທະເລຜາກົດເໝືອນຕົ້ນອໍ້ແລະຕົ້ນໄຜ່
ທ່ານສຸບປາຣະກະ ພວກເຮົາຂໍຖາມ ທະເລນີ້ຊື່ອັນໃດ

(ພຣະໂພທິສັດຕອບວ່າ)

[໑໑໗] ເມື່ອເຮືອຂອງພວກທ່ານຜູ້ເປັນພໍ່ຄ້າສະແຫວງຫາຊັບ
ອອກໄປຈາກທ່າພະຣຸຄັດສະ ແລ່ນໄປຜິດທິດທາງ
ທະເລນີ້ເຂົາຮຽກວ່າ ນະມາລີ

(ພວກພໍ່ຄ້າຖາມວ່າ)

[໑໑໘] ສຽງເປັນຕາຢ້ານຫຼາຍ ເປັນຕາອະເຍືອງ
ຟັງຄືສຽງຂອງອະມະນຸດ
ທະເລຜາກົດເໝືອນເປັນຂຸມເປັນບວກ
ທ່ານສຸບປາຣະກະ ພວກເຮົາຂໍຖາມ ທະເລນີ້ຊື່ອັນໃດ

(ພຣະໂພທິສັດຕອບວ່າ)

[໑໑໙] ເມື່ອເຮືອຂອງພວກທ່ານຜູ້ເປັນພໍ່ຄ້າສະແຫວງຫາຊັບ
ອອກໄປຈາກທ່າພະຣຸຄັດສະ ແລ່ນໄປຜິດທິດທາງ
ທະເລນີ້ເຂົາຮຽກວ່າ ພະລະວາມຸຂີ

[໑໒໐] ຕັ້ງແຕ່ຂ້າພະເຈົ້າຮູ້ດຽງສາ ຂ້າພະເຈົ້າຈຳຕົວເອງໄດ້ວ່າ
ຂ້າພະເຈົ້າຍັງບໍ່ໄດ້ຮູ້ສຶກວ່າແກ້ງບຽດບຽນສັດແມ່ນຈັກຕົວໜຶ່ງເລີຍ
ດ້ວຍສັດຈະວາຈານີ້ ຂໍເຮືອຈົ່ງກັບໂດຍຄວາມປອດໄພເທີ້ນ

**ສຸບປາຣະກະຊາດົກທີ ໙ ຈົບ**

## ລວມຊາດົກທີ່ມີໃນນິບາດນີ້ ຄື

໑. ມາຕຸໂປສະກະຊາດົກ
໒. ທຳມະເທວະປຸດຕະຊາດົກ
໓. ປານີຍະຊາດົກ
໔. ທະສະຣະຖະຊາດົກ
໕. ສຸບປາຣະກະຊາດົກ
໖. ຂຸນຫະຊາດົກ
໗. ອຸທະຍະຊາດົກ
໘. ຍຸທັນຊະຍະຊາດົກ
໙. ສັງວະຣະຊາດົກ

**ເອກາທະສະກະນິບາດ ຈົບ**

# ໑໔. ທະວາທະສະກະນິບາດ

## ໑. ຈູລະກຸນາລະຊາດົກ (໔໖໔)
## ວ່າດ້ວຍນົກກາເວົ້າຈູລະກຸນາລະ

(ພຣະໂພທິສັດໄດ້ກ່າວວ່າ)

[໑] ບຸຣຸດຜູ້ບໍ່ຖືກຜີສິງບໍ່ຄວນເຊື່ອຍິງທີ່ເປັນຄົນໂລບ
ມີຈິດກັບກອກ ບໍ່ຮູ້ຄຸນຄົນ ເປັນຄົນປະທຸດສະຮ້າຍມິດ

[໒] ຍິງເຫຼົ່ານັ້ນບໍ່ຮູ້ກິດທີ່ເຮັດແລ້ວແລະຍັງບໍ່ເຮັດ
ບໍ່ຮູ້ຈັກມານດາບິດາຫຼືອ້າຍນ້ອງ
ບໍ່ແມ່ນອາຣະຍະຊົນ ກ້າວລ່ວງທຳທັງຫຼາຍ
ຕົກໄປສູ່ອຳນາດຈິດຂອງຕົນທີ່ນັ້ນ

[໓] ເມື່ອມີອັນຕະລາຍແລະກິດເກີດຂຶ້ນ
ຍິງເຫຼົ່ານັ້ນຍ່ອມລະຖິ້ມສາມີນັ້ນ
ແມ່ນຢູ່ຮ່ວມກັນມານານ ເປັນທີ່ຮັກທີ່ພໍໃຈ
ເປັນຜູ້ອະນຸເຄາະສະເໝີດ້ວຍຊີວິດ
ເພາະສະນັ້ນ ຂ້າພະເຈົ້າຈຶ່ງບໍ່ວາງໃຈຍິງທັງຫຼາຍ

[໔] ແທ້ຈິງ ຈິດຂອງຍິງເໝືອນຈິດຂອງວານອນ
ຂຶ້ນ ໆ ລົງ ໆ ເໝືອນເງົາຕົ້ນໄມ້
ຫົວໃຈຂອງຍິງຫວັ່ນໄຫວບໍ່ຢຸດນິ່ງ
ກັບກອກເໝືອນລໍ້ກວຽນທີ່ກຳລັງໝຸນໄປ

[໕] ເວລາໃດ ຍິງເຫຼົ່ານັ້ນເບິ່ງເຫັນຊັບຂອງຊາຍທີ່ພໍຈະຖືເອົາໄດ້
ກໍໃຊ້ວາຈາອ່ອນຫວານນຳເຂົາໄປສູ່ອຳນາດ
ເໝືອນກັບຊາວກຳໂພຊະໃຊ້ສາຫຣ່າຍລໍ້ຫຼອກມ້າ

[໖] ເວລາໃດ ເບິ່ງບໍ່ເຫັນຊັບຂອງຊາຍທີ່ພໍຈະຖືເອົາໄດ້
ກໍລະຖິ້ມເຂົາໄປສາໂດຍງ່າຍເໝືອນຄົນຂ້າມຟາກ
ພໍເຖິງຝັ່ງກໍຖິ້ມແພໄປສາ

[໗] ຍິງປຽບເໝືອນຢາງໜຽວ
ກິນທຸກສິ່ງທຸກຢ່າງເໝືອນແປວໄຟ
ມີມາຍາແຮງກ້າເໝືອນແມ່ນ້ຳທີ່ມີກະແສແຮງ
ເພາະວ່າ ຍິງເຫຼົ່ານັ້ນຄົບໄດ້ທັງຊາຍຄົນຮັກແລະບໍ່ແມ່ນຄົນຮັກ
ເໝືອນເຮືອຈອດໄດ້ທັງຝັ່ງນີ້ແລະຝັ່ງນັ້ນ

[໘] ຍິງເຫຼົ່ານັ້ນບໍ່ແມ່ນເປັນຂອງຊາຍຄົນດຽວຫຼືສອງຄົນ
ເໝືອນຮ້ານຕະຫຼາດທີ່ແຜ່ກວ້າງແກ່ຄົນທົ່ວໄປ
ຊາຍໃດສຳຄັນຍິງເຫຼົ່ານັ້ນວ່າເປັນຂອງເຮົາ
ຊາຍນັ້ນເທົ່າກັບໃຊ້ຕາໜ່າງດັກລົມ

[໙] ແມ່ນ້ຳ ຫົນທາງ ໂຮງສຸຣາ ສະພາ
ແລະນ້ຳສ້າງດື່ມເປັນສັນໃດ
ທຳມະດາຍິງໃນໂລກກໍສັນນັ້ນ
ຂອບເຂດຂອງຍິງເຫຼົ່ານັ້ນບໍ່ມີເລີຍ

[໑໐] ຍິງເຫຼົ່ານັ້ນສະເໝີດ້ວຍໄຟກິນປຽງ (ນ້ຳມັນ)
ອຸປະມາດ້ວຍຫົວງູເຫົ່າ ເລືອກກິນແຕ່ຂອງທີ່ດີເລີດ
ເໝືອນງົວເລືອກເລັມແຕ່ຫຍ້າອ່ອນ ໆ ໃນພາຍນອກ

[໑໑] ໄຟກິນປຽງ ໑ ຊ້າງສານ ໑ ງູເຫົ່າ ໑
ກະສັດຜູ້ໄດ້ຮັບມຸດທາພິເສກແລ້ວ ໑ ຍິງທັງປວງ ໑
ທັງ ໕ ຢ່າງນີ້ ນໍຣະຊົນເພິ່ງຄົບຫາໂດຍຄວາມຣະມັດຣະວັງເປັນນິດ
ຍ້ອນວ່າ ອັດທະຍາໄສຂອງຄົນທັງ ໕ ຈຳພວກນັ້ນຮູ້ໄດ້ຍາກ

[໑໒] ຍິງທີ່ມີຮູບງາມຫຼາຍ ໑
ຍິງທີ່ມີຊາຍຈຳນວນຫຼາຍພໍໃຈ ໑
ຍິງຜູ້ຊຳນານໃນການຟ້ອນລຳຂັບຮ້ອງ ໑
ຍິງຜູ້ເປັນພັນລະຍາຂອງຊາຍອື່ນ ໑
ຍິງທີ່ເຫັນແກ່ຊັບ ໑
ຍິງທັງ ໕ ຈຳພວກເຫຼົ່ານີ້ ຊາຍບໍ່ຄວນຄົບຫາເລີຍ

**ຈູລະກຸນາລະຊາດົກທີ ໑ ຈົບ**

# ๘. ພັດທະສາລະຊາດົກ (໔໖໕)
## ວ່າດ້ວຍເທວະດາປະຈຳຕົ້ນຮັງໜຸ່ມ

(ພຣະຣາຊາຕັດກັບເທວະດາວ່າ)

[໑໓] ທ່ານເປັນໃຜ ມີເສື້ອຜ້າສະອາດມົດຈິດ
ຢືນຢູ່ທ່າມກາງນະພາກາດ
ຍ້ອນເຫດໃດ ນ້ຳຕາຂອງທ່ານຈຶ່ງຫຼັ່ງໄຫຼ
ໄພນັ້ນເກີດຈາກອັນໃດ

(ພັດທະສາລະຈອມເທບຕັດວ່າ)

[໑໔] ຂໍເດຊະພຣະອົງຜູ້ສົມມຸດຕິເທບ ເມື່ອຂ້າພຣະອົງ
ເປັນຜູ້ທີ່ປະຊາຊົນໃນແຄວ້ນຂອງພຣະອົງບູຊາຢູ່ຕະຫຼອດ ໖໐,໐໐໐ ປີ
ປະຊາຊົນເຫຼົ່ານັ້ນຮູ້ຈັກຂ້າພຣະອົງວ່າ
ພັດທະສາລະຣຸກຂະເທບ

[໑໕] ຂໍເດຊະພຣະອົງຜູ້ເປັນໃຫຍ່ແຫ່ງທິດ
ພຣະຣາຊາພຣະອົງກ່ອນ ໆ ເມື່ອຈະຊົງສ້າງພຣະນະຄອນກໍດີ
ອາຄານແລະຜາສາດຊະນິດຕ່າງ ໆ ກໍດີ
ກໍບໍ່ໄດ້ຊົງໝິ່ນຂ້າພຣະອົງເລີຍ
ພຣະຣາຊາເຫຼົ່ານັ້ນບູຊາຂ້າພຣະອົງແລ້ວສັນໃດ
ແມ່ນພຣະອົງກໍຈົ່ງບູຊາຂ້າພຣະອົງສັນນັ້ນເທີ້ນ

(ພຣະຣາຊາຕັດວ່າ)

[໑໖] ຂ້າພະເຈົ້າຍັງບໍ່ໄດ້ເຫັນຕົ້ນໄມ້
ທີ່ມີລຳຕົ້ນໃຫຍ່ເທົ່າກັບລຳຕົ້ນຂອງທ່ານເລີຍ
ທ່ານເປັນຕົ້ນໄມ້ທີ່ມີລຳຕົ້ນງາມ
ມີສັນຖານສົມສ່ວນແລະຊື່ໂດຍກຳເນີດ

[໑໗] ຂ້າພະເຈົ້າຈະສ້າງຜາສາດທີ່ມີເສົາດຽວ ອັນໜ້າຣື່ນຣົມ
ຈັກນຳທ່ານເຂົ້າໄປຢູ່ໃນຜາສາດຫຼັງນັ້ນ
ທ່ານຜູ້ຄວນບູຊາ ຊີວິດຂອງທ່ານຈັກຍັ່ງຢືນ

(ພັດທະສາລະຈອມເທບຕັດວ່າ)

[໑໗] ຫາກພຣະອົງເກີດຄວາມດຳຣິເຊັ່ນນີ້
ຫາກພຣະອົງຊົງປາຖະໜາຈະແຍກຮ່າງກາຍຂອງຂ້າພຣະອົງ
ຂໍພຣະອົງຈົ່ງຟັນງ່າກ້ານຂ້າພຣະອົງໃຫ້ຫຼາຍແລ້ວຕັດໃຫ້ເປັນທ່ອນ ໆ
[໑໘] ພຣະອົງຈົ່ງຕັດຍອດກ່ອນ ຕໍ່ມາຈົ່ງຕັດກາງລຳຕົ້ນ
ແລະຈົ່ງຕັດເຫງົ້າໃນພາຍຫຼັງ
ເມື່ອຂ້າພຣະອົງຖືກຕັດຢ່າງນີ້ ຈະເພິ່ງຕາຍບໍ່ເປັນທຸກ

(ພຣະຣາຊາຕັດວ່າ)

[໒໐] ເໝືອນຣາດຊະບຸຣຸດຕັດມື ຕັດຂາ ຕັດຫູ ແລະຕັດດັງກ່ອນ
ຕໍ່ມາພາຍຫຼັງຈຶ່ງຕັດຫົວຂອງໂຈນທີ່ຍັງເປັນຢູ່
ການຕາຍນັ້ນເພິ່ງເປັນທຸກ
[໒໑] ພັດທະສາລະຜູ້ເປັນເຈົ້າປ່າ ການຖືກຕັດເປັນທ່ອນ ໆ ເປັນສຸກບໍ
ຍ້ອນເຫດໃດ ຍ້ອນອາໄສອັນໃດ
ທ່ານຈຶ່ງປາຖະໜາການຖືກຕັດເປັນທ່ອນ ໆ

(ພັດທະສາລະຈອມເທບຕັດວ່າ)

[໒໒] ກໍຂ້າພຣະອົງອາໄສເຫດອັນໃດເຊິ່ງເປັນເຫດອັນປະກອບດ້ວຍທຳ
ຈຶ່ງປາຖະໜາການຖືກຕັດເປັນທ່ອນ ໆ
ຂໍເດຊະພຣະມະຫາຣາດ
ຂໍພຣະອົງຊົງສະດັບເຫດອັນນັ້ນຂອງຂ້າພຣະອົງ
[໒໓] ພວກຍາດຂອງຂ້າພຣະອົງຈະເລີນເຕີບໂຕຢ່າງມີຄວາມສຸກ
ເກີດໃນບ່ອນອັບລົມຂ້າງ ໆ ຂ້າພຣະອົງ
ຂ້າພຣະອົງເພິ່ງບຽດບຽນພວກຍາດແມ່ນເຫຼົ່ານັ້ນ
ຊື່ວ່າໄດ້ກໍ່ຄວາມບໍ່ສຸກສະບາຍໃຫ້ແກ່ຜູ້ອື່ນ

(ພຣະຣາຊາຊົງສະດັບຄຳນັ້ນແລ້ວ ຈຶ່ງຕັດວ່າ)

[໒໔] ພັດທະສາລະຜູ້ເຈົ້າປ່າ ທ່ານໄດ້ຄິດສິ່ງທີ່ຄວນຄິດ
ປາຖະໜາປະໂຫຍດເກື້ອກູນແກ່ໝູ່ຍາດ
ສະຫາຍເອີຍ ເຮົາໃຫ້ອະໄພແກ່ທ່ານ

ພັດທະສາລະຊາດົກທີ ໘ ຈົບ

## ໓. ສະມຸດທະວານິຊະຊາດົກ (໔໖໖)
## ວ່າດ້ວຍພໍ່ຄ້າທາງເຮືອເດີນທະເລ

(ພຣະສາດສະດາຕັດວ່າ)

[໘໕] ມະນຸດເຫຼົ່ານັ້ນພາກັນໄຖ ພາກັນຫວ່ານ
ອາໄສຜົນແຫ່ງວຽກງານລ້ຽງຊີບຢູ່ ກໍຍັງບໍ່ເຖິງສ່ວນແຫ່ງເກາະນີ້
ເກາະຂອງເຮົານີ້ປະເສີດກວ່າຊົມພູທະວີບ

(ເທບພະບຸດກ່າວວ່າ)

[໘໖] ໃນຄືນພຣະຈັນເພັງ ໑໕ ຄ່ຳ
ທະເລຈັກມີຄື້ນແຮງຫຼາຍ ຈັກຖ້ວມເກາະໃຫຍ່ແຫ່ງນີ້
ຂໍກຳລັງຄື້ນນ້ຳທະເລຢ່າໄດ້ຂ້າພວກທ່ານເລີຍ
ພວກທ່ານຈົ່ງໄປສູ່ເກາະອື່ນເທີ້ນ

(ເທບພະບຸດຜູ້ຮ້າຍກາດອີກຕົນໜຶ່ງໄດ້ກ່າວວ່າ)

[໘໗] ກຳລັງຄື້ນນ້ຳທະເລຈະບໍ່ເກີດ
ຈັກບໍ່ຖ້ວມເກາະໃຫຍ່ແຫ່ງນີ້
ຂ້າພະເຈົ້າເຫັນເຫດນັ້ນດ້ວຍນິມິດຫຼວງຫຼາຍ
ພວກທ່ານຢ່າຢ້ານໄປເລີຍ ຈະເສົ້າໂສກເຮັດຫຍັງ ຈົ່ງຣື່ນເຣີງກັນເທີ້ນ

[໘໘] ເກາະໃຫຍ່ນີ້ມີອາຫານພຽງພໍ ມີເຂົ້າແລະນ້ຳຈຳນວນຫຼາຍ
ພວກທ່ານຈົ່ງຍຶດຄອງເປັນບ່ອນຢູ່ອາໄສເທີ້ນ
ຂ້າພະເຈົ້າຍັງບໍ່ເຫັນໄພອັນໃດສຳລັບພວກທ່ານເລີຍ
ທ່ານທັງຫຼາຍຈົ່ງຣື່ນເຣີງບັນເທີງໃຈໄປຕະຫຼອດຊົ່ວລູກຊົ່ວຫຼານເທີ້ນ

(ນາຍຊ່າງຜູ້ໂງ່ຈ້າກ່າວວ່າ)

[໘໙] ເທບພະບຸດອົງໃດໃນທິດທັກຂິນນີ້ຍ່ອມກ່າວຄັດຄ້ານວ່າ
ປອດໄພ ຄຳຂອງເທບພະບຸດອົງນັ້ນເປັນຄວາມຈິງ
ສ່ວນເທບພະບຸດທິດອຸດອນບໍ່ຮູ້ເຖິງໄພຫຼືບໍ່ມີໄພ

ພວກທ່ານຢ່າຢ້ານໄປເລີຍ ຈະເສົ້າໂສກເຮັດຫຍັງ ຈົ່ງຮື່ນເຣີງກັນເທີ້ນ

(ຝ່າຍນາຍຊ່າງຜູ້ເປັນບັນດິດໄດ້ກ່າວວ່າ)

[໓໐] ເທບພະບຸດເຫຼົ່ານີ້ກ່າວຂັດແຍ້ງກັນ
ຕົນໜຶ່ງກ່າວວ່າຈະມີໄພ ຕົນໜຶ່ງກ່າວວ່າຈະປອດໄພ
ຢ່າງໃດກໍຕາມ ພວກທ່ານຈົ່ງຟັງຄຳຂອງເຮົາ
ພວກເຮົາທັງໝົດຢ່າພາກັນພິນາດໂດຍໄວເລີຍ

[໓໑] ພວກເຮົາທັງໝົດຈົ່ງມາພ້ອມກັນສ້າງເຮືອ
ປະກອບເຄື່ອງຍົນທຸກຢ່າງໃຫ້ໝັ້ນຄົງ
ຖ້າເທບພະບຸດທິດທັກຂິນນີ້ກ່າວຈິງ
ເທບພະບຸດອົງທິດອຸດອນນີ້ກໍກ່າວຄັດຄ້ານຊື່ ໆ
ອັນໜຶ່ງ ເມື່ອເກີດອັນຕະລາຍຂຶ້ນ ເຮືອຂອງພວກເຮົານັ້ນຈັກມີປະໂຫຍດ
ແລະພວກເຮົາຈະບໍ່ລະຖິ້ມເກາະນີ້ໄປ

[໓໘] ແຕ່ຖ້າເທບພະບຸດທິດອຸດອນກ່າວຈິງ
ເທບພະບຸດທິດທັກຂິນນີ້ກໍກ່າວຄັດຄ້ານຊື່ ໆ
ພວກເຮົາທັງໝົດກໍຈະພາກັນຂຶ້ນເຮືອລຳນັ້ນ
ເມື່ອເປັນເຊັ່ນນີ້ ພວກເຮົາກໍຈະມີຄວາມປອດໄພຂ້າມໄປຈົນເຖິງຝັ່ງ

[໓໓] ຄຳທີ່ເທບອົງທຳອິດກ່າວກັບຄຳຫຼັງ
ຢ່າໄປເຊື່ອເອົາງ່າຍ ໆ ວ່າຖືກຕ້ອງ
ສ່ວນຄຳທີ່ຜ່ານຫູມາ ນໍຣະຊົນໃດໃນໂລກນີ້ເກັບເອົາມາພິຈາລະນາ
ເລືອກເອົາແຕ່ຄຳທີ່ຖືກຕ້ອງ
ນໍຣະຊົນນັ້ນຍ່ອມເຂົ້າເຖິງຖານະອັນປະເສີດ

(ພຣະສາດສະດາຕັດ ໓ ພຣະຄາຖາວ່າ)

[໓໘] ກຸນລະບຸດຜູ້ມີປັນຍາເໝືອນແຜ່ນດິນ
ຮູ້ແຈ້ງຄັກເຖິງປະໂຫຍດໃນອະນາຄົດແລ້ວ
ຍ່ອມບໍ່ໃຫ້ປະໂຫຍດແມ່ນໜ້ອຍລ່ວງເລີຍໄປ
ເໝືອນພວກພໍ່ຄ້າເຫຼົ່ານັ້ນໄດ້ໄປໂດຍຄວາມປອດໄພກາງນ້ຳທະເລ
ຕາມການກະທຳຂອງຕົນ

[໓໘] ສ່ວນພວກຄົນພານຜູ້ທີ່ຕິດຢູ່ໃນຣົດເພາະໂມຫະ
ບໍ່ຮູ້ແຈ້ງຄັກເຖິງປະໂຫຍດໃນອະນາຄົດ
ມົກມຸ້ນຢູ່ໃນປະໂຫຍດທີ່ເກີດຂຶ້ນໃນປັດຈຸບັນ ຍ່ອມເຖິງຄວາມພິນາດ
ເໝືອນພວກມະນຸດທີ່ພິນາດກາງທະເລເຫຼົ່ານັ້ນ

[໓໖] ຄົນຜູ້ເປັນບັນດິດເພິ່ງຮີບເຮັດກິດທີ່ຄວນເຮັດໃນອະນາຄົດດ້ວຍຫວັງວ່າ
ໃນເວລາທີ່ເຮັດກິດ ຂໍກິດທີ່ຄວນເຮັດຢ່າໄດ້ບຽດບຽນເຮົາ
ກິດນັ້ນຍ່ອມບໍ່ບຽດບຽນເຂົາຜູ້ຟ້າວເຮັດກິດທີ່ຄວນເຮັດເຊັ່ນນັ້ນ

**ສະມຸດທະວານິຊະຊາດົກທີ ໑ ຈົບ**

## ໔. ກາມະຊາດົກ (໔໗໗)
## ວ່າດ້ວຍກາມແລະໂທດຂອງກາມ

(ພຣະໂພທິສັດຂາບທູນວ່າ)

[໓໗] ຫາກສິ່ງທີ່ສັດໂລກຕ້ອງການນັ້ນສຳເລັດແກ່ເຂົາຜູ້ຕ້ອງການກາມ
ເມື່ອເຂົາໄດ້ແລ້ວຍ່ອມຈະອີ່ມໃຈແນ່ນອນ

[໓໙] ຫາກສິ່ງທີ່ຕ້ອງການນັ້ນສຳເລັດແກ່ເຂົາຜູ້ຕ້ອງການກາມ
ເມື່ອຄວາມປາຖະໜາສຳເລັດແລ້ວ
ເຂົາຍັງປາຖະໜາຕໍ່ໄປອີກ
ຍ່ອມປະສົບຄວາມຢາກຍິ່ງ ໆ ຂຶ້ນໄປ
ເໝືອນຄົນຕາກລົມແລະແດດໃນລະດູຮ້ອນ
ຕ້ອງປະສົບຄວາມກະຫາຍຍິ່ງ ໆ ຂຶ້ນໄປ

[໓໙] ຄວາມຢາກແລະຄວາມກະຫາຍຍ່ອມພອກພູນໂດຍຍິ່ງ
ແກ່ຄົນຜູ້ໂງ່ຈ້າເບົາປັນຍາ ບໍ່ຮູ້ພຣະສັດທຳ
ຜູ້ມີຮ່າງກາຍກຳລັງຈະເລີນເຕີບໂຕ
ເໝືອນເຂົາຈະເລີນແກ່ງົວຕົວທີ່ກຳລັງມີເຂົາຈະເລີນເຕີບໂຕ

[໔໐] ແມ່ນຈະໃຫ້ນາເຂົ້າສາລີ ນາເຂົ້າໜຽວ ງົວ ມ້າ
ແລະທາດຊາຍຍິງທັງແຜ່ນດິນ ກໍບໍ່ພຽງພໍສຳລັບຄົນຄົນດຽວ
ບຸກຄົນຮູ້ແນວນີ້ແລ້ວເພິ່ງປະພຶດທຳໃຫ້ສະໝ່ຳສະເໝີ

[໔໑] ພຣະຣາຊາຊົງຜາບຂ້າເສິກ ຊະນະທົ່ວທັງແຜ່ນດິນ
ຊົງປົກຄອງແຜ່ນດິນອັນມີສະມຸດສາຄອນເປັນບ່ອນສຸດ
ຍັງບໍ່ຊົງອີ່ມພຣະທະໄທໃນມະຫາສະມຸດຝັ່ງນີ້
ຊົງປາຖະໜາແມ່ນມະຫາສະມຸດຝັ່ງນັ້ນອີກ

[໔໒] ບຸກຄົນບໍ່ປະສົບຄວາມອີ່ມໃຈ
ຕະຫຼອດເວລາທີ່ຍັງຫວນຣະນຶກເຖິງການທັງຫຼາຍຢູ່
ບຸກຄົນເຫຼົ່າໃດກັບໃຈ ມີກາຍຫຼີກອອກຈາກການນັ້ນ
ເຫັນໂທດໃນການທັງຫຼາຍ
ເປັນຜູ້ອີ່ມແລ້ວດ້ວຍປັນຍາ
ບຸກຄົນເຫຼົ່ານັ້ນແລຊື່ວ່າເປັນຜູ້ອີ່ມ

[໔໓] ບັນດາຄວາມອີ່ມທັງຫຼາຍ ຄວາມອີ່ມດ້ວຍປັນຍາປະເສີດທີ່ສຸດ
ຍ້ອນບຸກຄົນຜູ້ອີ່ມດ້ວຍປັນຍານັ້ນບໍ່ເດືອດຮ້ອນຍ້ອນການທັງຫຼາຍ
ຄົນທີ່ອີ່ມດ້ວຍປັນຍາ ຕັນຫາເຮັດໃຫ້ຢູ່ໃນອຳນາດບໍ່ໄດ້

[໔໔] ບຸກຄົນບໍ່ເພິ່ງສັ່ງສົມການ
ຄວນເປັນຄົນປາຖະໜາໜ້ອຍ ບໍ່ໂລເລເຫຼາະແຫຼະ
ຄົນຜູ້ມີປັນຍາພຽງດັ່ງມະຫາສະມຸດບໍ່ຮ້ອນຮົນຍ້ອນການທັງຫຼາຍ

[໔໕] ສ່ວນໃດ ໆ ຂອງການທັງຫຼາຍທີ່ລະໄດ້
ສ່ວນນັ້ນ ໆ ກໍບັນດານໃຫ້ເປັນສຸກໄດ້
ຖ້າປາຖະໜາສຸກທຸກສ່ວນກໍຄວນລະການໃຫ້ໝົດ
ເໝືອນຊ່າງໜັງຕັດເອົາໜັງມາເຮັດເກີບ

(ພຣະຣາຊາຕັດວ່າ)

[໔໖] ທ່ານມະຫາພາມ ຄາຖາທັງໝົດທີ່ທ່ານກ່າວແລ້ວ ໘ ຄາຖາ
ມີຄ່ານັບເປັນພັນ ໆ ກະຫາປະນະ
ທ່ານຈົ່ງຮັບຊັບໄປເທີ້ນ ພາສິດຂອງທ່ານນີ້ດີຫຼາຍ

(ພຣະໂພທິສັດຂາບທູນວ່າ)

[໔໗] ຂ້າພຣະອົງບໍ່ຕ້ອງການຊັບເປັນຮ້ອຍ ເປັນພັນ ຫຼືເປັນໝື່ນ
ເພາະເມື່ອຂ້າພຣະອົງກ່າວຄາຖາສຸດທ້າຍ ໃຈບໍ່ຍິນດີໃນການເລີຍ

(ພຣະຣາຊາຊົງສັນເສີນພຣະໂພທິສັດວ່າ)

[໔໗] ມານົບ ຄົນນີ້ເປັນຜູ້ຈະເລີນນໍ
ເປັນນັກປາດ ຮູ້ແຈ້ງໂລກທັງປວງ
ເປັນບັນດິດ ກຳນົດຮູ້ຕັນຫາອັນໃຫ້ເກີດທຸກໄດ້

**ກາມະຊາດົກທີ ໘ ຈົບ**

## ໕. ຊະນະສັນທະຊາດົກ (໔໖໗)
## ວ່າດ້ວຍພຣະເຈົ້າຊະນະສັນທະ

(ພຣະສາດສະດາຕັດພຣະຄາຖາເຫຼົ່ານີ້ວ່າ)

[໔໙] ໄດ້ຍິນມາວ່າ ພຣະເຈົ້າຊະນະສັນທະຕັດໄວ້ແນວນີ້ວ່າ
ເຫດ ໑໐ ປະການທີ່ບຸກຄົນບໍ່ໄດ້ເຮັດໄວ້ກ່ອນ
ເຂົາຍ່ອມເດືອດຮ້ອນໃນພາຍຫຼັງ

[໕໐] ບຸກຄົນບໍ່ໄດ້ຊັບເຊິ່ງຕົນບໍ່ໄດ້ສະສົມໄວ້ຍ່ອມເດືອດຮ້ອນ
ເຂົາຍ່ອມເດືອດຮ້ອນໃນພາຍຫຼັງແນວນີ້ວ່າ
ເຮົາບໍ່ໄດ້ສະແຫວງຫາຊັບໄວ້ກ່ອນ

[໕໑] ບຸກຄົນຍ່ອມເດືອດຮ້ອນໃນພາຍຫຼັງແນວນີ້ວ່າ
ຍ້ອນເຮົາບໍ່ໄດ້ສຶກສາສິລະປະທີ່ມີຢູ່ກ່ອນ ເຊິ່ງອາດຈະສຶກສາໄດ້
ຄົນທີ່ບໍ່ມີສິລະປະກໍຫາກິນລຳບາກ

[໕໒] ບຸກຄົນຍ່ອມເດືອດຮ້ອນໃນພາຍຫຼັງແນວນີ້ວ່າ
ເມື່ອກ່ອນເຮົາເປັນຄົນໂກງ ເປັນຄົນມັກເວົ້າສໍ່ສຽດ
ປີ້ນປ້ອນ ດຸຮ້າຍ ແລະຫຍາບຄາຍ

[໕໓] ບຸກຄົນຍ່ອມເດືອດຮ້ອນໃນພາຍຫຼັງແນວນີ້ວ່າ
ເມື່ອກ່ອນເຮົາເປັນຄົນມັກຂ້າສັດ ໂຫດຮ້າຍ ປ່າເຖື່ອນ
ບໍ່ຍອມນອບນ້ອມຕໍ່ຄົນທັງຫຼາຍ

[໕໔] ບຸກຄົນຍ່ອມເດືອດຮ້ອນໃນພາຍຫຼັງແນວນີ້ວ່າ
ເມື່ອຍິງທັງຫຼາຍທີ່ບໍ່ມີຄູ່ຄອງມີຢູ່ເປັນຈຳນວນຫຼາຍ

ເຮົາກໍມັກເປັນຊູ້ກັບເມຍຄົນອື່ນ

[໕໕] ບຸກຄົນຍ່ອມເດືອດຮ້ອນໃນພາຍຫຼັງແນວນີ້ວ່າ
ເມື່ອເຂົ້າແລະນ້ຳຜາກົດມີຢູ່ເປັນຈຳນວນຫຼາຍ
ແຕ່ເຮົາກໍບໍ່ໄດ້ໃຫ້ທານມາກ່ອນ

[໕໖] ບຸກຄົນຍ່ອມເດືອດຮ້ອນໃນພາຍຫຼັງແນວນີ້ວ່າ
ພໍ່ແລະແມ່ຜູ້ແກ່ເຖົ້າຊະຣາພົ້ນໄວໜຸ່ມສາວໄປແລ້ວ
ເຮົາສາມາດຈະລ້ຽງດູໄດ້ ແຕ່ກໍບໍ່ໄດ້ລ້ຽງດູ

[໕໗] ບຸກຄົນຍ່ອມເດືອດຮ້ອນໃນພາຍຫຼັງແນວນີ້ວ່າ
ບິດາຜູ້ເປັນອາຈານຕາມພ່ຳສອນ
ນຳຮົດທີ່ຕ້ອງການທຸກຢ່າງມາລ້ຽງດູ
ເຮົາກໍດູໝິ່ນສາ

[໕໘] ບຸກຄົນຍ່ອມເດືອດຮ້ອນໃນພາຍຫຼັງແນວນີ້ວ່າ
ສະມະນະແລະພາມຜູ້ມີສິນ ຜູ້ເປັນພະຫູສູດ
ເຮົາກໍບໍ່ໄດ້ເຄີຍຄົບຫາມາກ່ອນ

[໕໙] ບຸກຄົນຍ່ອມເດືອດຮ້ອນໃນພາຍຫຼັງແນວນີ້ວ່າ
ຕະບະທີ່ພ່ຳເພັງແລ້ວ ສັດຕະບຸຣຸດທີ່ຄົນເຂົ້າໄປຄົບຫາແລ້ວຍ່ອມເປັນຄວາມດີ
ແຕ່ເຮົາບໍ່ໄດ້ພ່ຳເພັງຕະບະແລະຄົບຫາສັດຕະບຸຣຸດມາກ່ອນເລີຍ

[໖໐] ກໍເຫດ ໑໐ ປະການເຫຼົ່ານີ້ຜູ້ໃດໄດ້ປະຕິບັດໂດຍຖືກຕ້ອງ
ຜູ້ນັ້ນຊື່ວ່າເຮັດໜ້າທີ່ຂອງຄົນ ຍ່ອມບໍ່ເດືອດຮ້ອນໃນພາຍຫຼັງ

**ຊະນະສັນທະຊາດົກທີ ໕ ຈົບ**

## ໖. ມະຫາກັນຫະຊາດົກ (໔໖໙)
## ວ່າດ້ວຍເວລາທີ່ໝາດຳກິນຄົນ

(ພຣະຣາຊາຕັດຖາມທ້າວສັກກະວ່າ)

[໖໑] ໝາຂອງທ່ານທັງດຳທັງດຸ ຫຍິ່ງແຂ້ວຂາວວາວວາບ
ລ່າມມັດໄວ້ດ້ວຍເຊືອກ ໕ ເສັ້ນ ມັນຮ້ອງເຮັດຫຍັງ

(ທ້າວສັກກະຕັດວ່າ)

[໖໔]　　ພຣະເຈົ້າອຸສິນນະຣະ ໝາດຳຕົວນີ້ບໍ່ຕ້ອງການຊີ້ນສັດ
　　ມັນຈະຫຼຸດອອກໄປໃນເວລາທີ່ມັນຈະເຮັດພວກມະນຸດໃຫ້ພິນາດ

(ທ້າວສັກກະໄດ້ຕັດອີກວ່າ)

[໖໓]　　ເມື່ອໃດພວກສະມະນະຫົວໂລ້ນຄອງຜ້າສັງຄາຕິ
　　ອຸ້ມບາດ ເຮັດໄຮ່ເຮັດນາລ້ຽງຊີບ
　　ເມື່ອນັ້ນໝາດຳກໍຈະຫຼຸດອອກໄປກິນຊີ້ນສະມະນະໂລ້ນນັ້ນ

[໖໔]　　ເມື່ອໃດນັກບວດຍິງມີຫົວໂລ້ນຄອງຜ້າສັງຄາຕິ
　　ປະຕິຍານຕົນວ່າ ພໍ່າເພັງຕະບະ
　　ແຕ່ຊ່ອງເສບການມະຄຸນ ທ່ຽວໄປໃນໂລກ
　　ເມື່ອນັ້ນໝາດຳກໍຈະຫຼຸດອອກໄປ (ກິນຊີ້ນນັກບວດຍິງນັ້ນ)

[໖໕]　　ເມື່ອໃດພວກຊະດິນມີເຄົາໜວດຍາວ ມີຂີ້ແຂ້ວເຂີ
　　ມີຂີ້ຝຸ່ນເທິງຫົວທ່ຽວຫວງໝີ້ຢູ່
　　ເມື່ອນັ້ນໝາດຳກໍຈະຫຼຸດອອກໄປ (ກິນຊີ້ນຊະດິນນັ້ນ)

[໖໖]　　ເມື່ອໃດພາມທັງຫຼາຍຮຽນພຣະເວດ ຮຽນສາວິດຕິສັນ
　　ແລະຮຽນຍັນວິທີແລ້ວທ່ຽວຮັບຈ້າງທຳການບູຊາຍັນ
　　ເມື່ອນັ້ນໝາດຳກໍຈະຫຼຸດອອກໄປ (ກິນຊີ້ນພາມເຫຼົ່ານັ້ນ)

[໖໗]　　ເມື່ອໃດພໍ່ແລະແມ່ຜູ້ແກ່ເຖົ້າຊະຣາຜ່ານໄວໜຸ່ມສາວໄປແລ້ວ
　　ບຸດທິດາມີຄວາມສາມາດພໍແຕ່ບໍ່ລ້ຽງດູ
　　ເມື່ອນັ້ນໝາດຳກໍຈະຫຼຸດອອກໄປ (ກິນຊີ້ນບຸດທິດາເຫຼົ່ານັ້ນ)

[໖໘]　　ເມື່ອໃດພໍ່ແລະແມ່ຜູ້ແກ່ເຖົ້າຊະຣາຜ່ານໄວໜຸ່ມສາວໄປແລ້ວ
　　ບຸດທິດາກ່າວຫາວ່າ ທ່ານທັງຫຼາຍເປັນຄົນພານ
　　ເມື່ອນັ້ນໝາດຳກໍຈະຫຼຸດອອກໄປ (ກິນຊີ້ນບຸດທິດາເຫຼົ່ານັ້ນ)

[໖໙]　　ເມື່ອໃດຊາຍທັງຫຼາຍໃນໂລກທ່ຽວປະພຶດອະສັດທຳ (ຄົບຊູ້)
　　ກັບພັນລະຍາຂອງອາຈານກໍດີ ພັນລະຍາຂອງເພື່ອນກໍດີ
　　ປ້າ ນ້າສາວ ອາສາວກໍດີ

ເມື່ອນັ້ນໝາດຳກໍຈະຫຼຸດອອກໄປ (ກິນຊີ້ນຊາຍເຫຼົ່ານັ້ນ)

[໗໐] ເມື່ອໃດພາມທັງຫຼາຍຖືດາບແລະໂລ່ໜັງ
ເນັບມິດທຳການປຸ້ນ ຂ້າຄົນເດີນທາງ
ເມື່ອນັ້ນໝາດຳກໍຈະຫຼຸດອອກໄປ (ກິນຊີ້ນພາມເຫຼົ່ານັ້ນ)

[໗໑] ເມື່ອໃດຊາຍທັງຫຼາຍຜູ້ຂັດສີສະຫວິວັນ ມີລຳແຂນລ່ຳສັນ
ບໍ່ຜາກົດຫຼັກຖານ ກໍ່ເວັ້ນໃຫ້ຍິງໝ້າຍ ທຳລາຍມິດຕະພາບ
ເມື່ອນັ້ນໝາດຳກໍຈະຫຼຸດອອກໄປ (ກິນຊີ້ນຊາຍເຫຼົ່ານັ້ນ)

[໗໒] ເມື່ອໃດຄົນມີມາຍາ ຜິດກົດກະຕິກາ
ມີຄວາມຄິດຢ່າງຄົນຊົ່ວຈັກມີຢູ່ໃນໂລກ
ເມື່ອນັ້ນໝາດຳກໍຈະຫຼຸດອອກໄປ (ກິນຊີ້ນຄົນມີມາຍານັ້ນ)

**ມະຫາກັນຫະຊາດົກທີ ໓ ຈົບ**

## ໗. ໂກສິຍະຊາດົກ (໔໗໐)
## ວ່າດ້ວຍໂກສິຍະເສດຖີ

(ໂກສິຍະເສດຖີກ່າວວ່າ)

[໗໓] ຂອງນີ້ມີຢູ່ພຽງເລັກໜ້ອຍ ໄດ້ມາແສນຍາກ
ຂ້າພະເຈົ້າບໍ່ໄດ້ຊື້ ບໍ່ໄດ້ຂາຍ ທັງບໍ່ໄດ້ສະສົມໄວ້ໃນບ່ອນນີ້
ເຂົ້າສຸກຖ້ວຍໜຶ່ງນີ້ບໍ່ພຽງພໍສຳລັບຄົນ ໒ ຄົນ

(ທ້າວສັກກະຕັດວ່າ)

[໗໔] ບຸກຄົນຄວນໃຫ້ແຕ່ໜ້ອຍຈາກຂອງທີ່ໜ້ອຍ
ຄວນໃຫ້ພໍປານກາງຈາກຂອງທີ່ມີພໍປານກາງ
ຄວນໃຫ້ຫຼາຍຈາກຂອງທີ່ມີຫຼາຍ
ຊື່ວ່າການບໍ່ໃຫ້ບໍ່ຄວນ

[໗໕] ທ່ານໂກສິຍະ ຍ້ອນເຫດນັ້ນ ຂ້າພະເຈົ້າຂໍບອກທ່ານວ່າ
ທ່ານຈົ່ງໃຫ້ທານແລະຈົ່ງບໍຣິໂພກ ຈົ່ງຂຶ້ນສູ່ທາງຂອງພຣະອະຣິຍະ
ຜູ້ກິນຄົນດຽວຍ່ອມບໍ່ໄດ້ຮັບຄວາມສຸກ

(ຈັນທະເທບພະບຸດເຂົ້າໄປຫາແລ້ວກ່າວວ່າ)

[໖໕] ຜູ້ໃດ ເມື່ອແຂກນັ່ງແລ້ວບໍຣິໂພກອາຫານແຕ່ຜູ້ດຽວ
ການບູຊາຂອງຜູ້ນັ້ນເປັນໂມຄະ
ແມ່ນຄວາມພຽນທີ່ຕັ້ງໄວ້ຖືກຂອງຜູ້ນັ້ນກໍເປັນໂມຄະ

[໖໖] ທ່ານໂກສິຍະ ຍ້ອນເຫດນັ້ນ ຂ້າພະເຈົ້າຂໍບອກທ່ານວ່າ
ທ່ານຈົ່ງໃຫ້ທານແລະຈົ່ງບໍຣິໂພກ ຈົ່ງຂຶ້ນສູ່ທາງຂອງພຣະອະຣິຍະ
ຜູ້ກິນຄົນດຽວຍ່ອມບໍ່ໄດ້ຮັບຄວາມສຸກ

(ສຸຣິຍະເທບເຂົ້າໄປຫາແລ້ວກ່າວວ່າ)

[໖໗] ຜູ້ໃດ ເມື່ອແຂກນັ່ງແລ້ວບໍ່ບໍຣິໂພກອາຫານແຕ່ຜູ້ດຽວ
ການບູຊາຂອງຜູ້ນັ້ນຍ່ອມມີຜົນແທ້
ແມ່ນຄວາມພຽນທີ່ຕັ້ງໄວ້ຖືກຂອງຜູ້ນັ້ນກໍມີຜົນຫຼາຍ

[໖໙] ທ່ານໂກສິຍະ ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງບອກທ່ານວ່າ
ທ່ານຈົ່ງໃຫ້ທານແລະຈົ່ງບໍຣິໂພກ
ຈົ່ງຂຶ້ນສູ່ທາງຂອງພຣະອະຣິຍະ
ຜູ້ກິນຄົນດຽວຍ່ອມບໍ່ໄດ້ຮັບຄວາມສຸກ

(ມາຕະລີເທບພະບຸດເຂົ້າໄປຫາແລ້ວກ່າວວ່າ)

[໗໐] ກໍບຸກຄົນເຂົ້າໄປສູ່ແຫຼ່ງນໍ້າບາງແຫ່ງແລ້ວບູຊາແມ່ນໍ້າຫຼາຍສາຍແດ່
ໃນສະໂບກຂະຣະນີຊື່ຄະຍາແດ່ ຢູ່ທ່ານໍ້າຊື່ໂທນະ
ແລະທ່ານໍ້າຊື່ຕິມພະຣຸແດ່ ທີ່ຫ້ວງນໍ້າໃຫຍ່ເຊິ່ງມີແລວນໍ້າໄຫຼແຮງແດ່

[໗໑] ຜູ້ໃດ ເມື່ອແຂກນັ່ງແລ້ວບໍ່ບໍຣິໂພກອາຫານແຕ່ຜູ້ດຽວ
ການບູຊາຂອງຜູ້ນັ້ນໃນບ່ອນນັ້ນ
ແລະຄວາມພຽນທີ່ຕັ້ງໄວ້ຖືກຂອງເຂົາໃນບ່ອນນັ້ນຍ່ອມມີຜົນ

[໗໔] ທ່ານໂກສິຍະ ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງບອກທ່ານວ່າ
ທ່ານຈົ່ງໃຫ້ທານແລະຈົ່ງບໍຣິໂພກ ຈົ່ງຂຶ້ນສູ່ທາງຂອງພຣະອະຣິຍະ
ຜູ້ກິນຄົນດຽວຍ່ອມບໍ່ໄດ້ຮັບຄວາມສຸກ

(ປັນຈະສິຂະເທບພະບຸດເຂົ້າໄປຫາແລ້ວກ່າວວ່າ)

[໗໓]  ຜູ້ໃດ ເມື່ອແຂກນັ່ງແລ້ວບໍຣິໂພກອາຫານແຕ່ຜູ້ດຽວ
ຜູ້ນັ້ນຊື່ວ່າກິນເບັດພ້ອມທັງເຄື່ອງຜູກທີ່ມີສາຍຍາວ

[໗໔]  ທ່ານໂກສິຍະ ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງບອກທ່ານວ່າ
ທ່ານຈົ່ງໃຫ້ທານແລະຈົ່ງບໍຣິໂພກ
ຈົ່ງຂຶ້ນສູ່ທາງຂອງພຣະອະຣິຍະ
ຜູ້ກິນຄົນດຽວຍ່ອມບໍ່ໄດ້ຮັບຄວາມສຸກ

(ໂກສິຍະເສດຖີເຫັນລິດຂອງເທບພະບຸດເຫຼົ່ານັ້ນແລ້ວຈຶ່ງກ່າວວ່າ)

[໗໕]  ພາມເຫຼົ່ານີ້ມີຜິວພັນງາມແທ້ນໍ
ແຕ່ໝາຂອງພວກທ່ານຕົວນີ້ ຍ້ອນເຫດໃດ
ຈຶ່ງປ່ຽນແປງຣັດສະໝີສີສັນໄດ້ຕ່າງ ໆ ນານາ
ຂ້າແດ່ທ່ານພາມທັງຫຼາຍ ຂໍທ່ານຈົ່ງບອກຂ້າພະເຈົ້າວ່າ
ພວກທ່ານເປັນໃຜກັນນໍ

(ທ້າວສັກກະເທວະຣາດຕັດວ່າ)

[໗໖]  ເທບທັງຫຼາຍທີ່ມາໃນບ່ອນນີ້ຄື
ຈັນທະເທບພະບຸດແລະສຸຣິຍະເທບພະບຸດທັງ ໔ ມາຕະລີເທບສາຣະຖີ
ເຮົາຄືທ້າວສັກກະຜູ້ເປັນຈອມແຫ່ງເທບຊັ້ນໄຕຣທິດ
ສ່ວນຜູ້ນີ້ຊື່ວ່າປັນຈະສິຂະເທບພະບຸດ

(ທ້າວສັກກະສັນເສີນຍົດຂອງປັນຈະສິຂະເທບພະບຸດວ່າ)

[໗໗]  ສຽງຕົບມື ໑ ຕະໂພນ ໑ ກອງ ໑ ເປີງມາງ ໑
ຍ່ອມປຸກເທບພະບຸດຜູ້ຫຼັບແລ້ວໃຫ້ຕື່ນຂຶ້ນ
ເທບພະບຸດຜູ້ຕື່ນຂຶ້ນແລ້ວຍ່ອມຣ່າເຣີງຍິນດີ

(ທ້າວສັກກະຕັດອີກວ່າ)

[໗໘]  ຄົນຜູ້ຂີ້ຖີ່ເຫັນແກ່ຕົວເຫຼົ່ານີ້
ບາງພວກມັກວ່າສະມະນະແລະພາມ
ເມື່ອທອດຖິ້ມຮ່າງກາຍໄວ້ໃນໂລກນີ້ຕາຍໄປກໍຕົກນະຣົກ

(ເພື່ອຈະສະແດງວ່າບຸກຄົນຜູ້ດໍາຣົງຢູ່ໃນທໍາໄດ້ບັງເກີດໃນເທວະໂລກຈຶ່ງຕັດວ່າ)

[໗໙] ຄົນຜູ້ຫວັງສຸກຄະຕິເຫຼົ່ານີ້ ບາງພວກດຳຣົງຢູ່ໃນທຳ
ຄືຄວາມສັງລວມແລະການຈຳແນກແຈກທານ
ເມື່ອປະຖິ້ມຮ່າງກາຍໄວ້ໃນໂລກນີ້ຕາຍໄປກໍໄປສຸກຄະຕິ

[໙໐] ທ່ານເປັນຍາດຂອງພວກເຮົາເມື່ອຊາດກ່ອນ
ແຕ່ທ່ານນັ້ນເປັນຄົນຂີ້ຖີ່ ມັກໂກດ ມີທຳຊົ່ວຊາມ
ພວກເຮົາມາບ່ອນນີ້ກໍເພື່ອປະໂຫຍດແກ່ທ່ານນັ້ນເອງ
ທ່ານຢ່າມີທຳຊົ່ວຊາມໄປຕົກນະຣົກເລີຍ

(ໂກສິຍະເສດຖີມີຈິດຍິນດີກ່າວວ່າ)

[໙໑] ພວກທ່ານຫວັງເກື້ອກູນຂ້າພະເຈົ້າຢ່າງແນ່ນອນຈຶ່ງໄດ້ພ່ຳສອນຂ້າພະເຈົ້າ
ຂ້າພະເຈົ້າຈະເຮັດນຳຄຳທີ່ພວກທ່ານຜູ້ຫວັງເກື້ອກູນກ່າວທຸກປະການ

[໙໒] ຕັ້ງແຕ່ວັນນີ້ໄປ ຂ້າພະເຈົ້ານັ້ນຈະຂໍງົດເວັ້ນ
ຈາກຄວາມຂີ້ຖີ່ ຈະບໍ່ເຮັດບາບອັນໃດ ໆ ອີກ
ອັນໜຶ່ງ ວັດຖຸອັນໃດ ໆ ທີ່ບໍ່ເພິ່ງໃຫ້ຈະບໍ່ມີແກ່ຂ້າພະເຈົ້າ
ແມ່ນແຕ່ນ້ຳຂ້າພະເຈົ້າຍັງບໍ່ໄດ້ໃຫ້ແລ້ວກໍຈະບໍ່ຍອມດື່ມ

[໙໓] ຂ້າແດ່ທ້າວສັກກະ ກໍເມື່ອຂ້າພະເຈົ້າໃຫ້ຢູ່ຕະຫຼອດການທັງປວງແນວນີ້
ແມ່ນໂພຄະຂອງຂ້າພະເຈົ້າຈັກໝົດສິ້ນໄປ ຂ້າແດ່ທ້າວສັກກະ
ຕໍ່ແຕ່ນີ້ຂ້າພະເຈົ້າຈະລະການທັງຫຼາຍຕາມທີ່ມີຢູ່ແລ້ວອອກບວດ

**ໂກສິຍະຊາດົກທີ ໗ ຈົບ**

## ໘. ເມນທະກະປັນທະຊາດົກ (໔໗໑)
## ວ່າດ້ວຍບັນຫາເລື້ອງແບ້ເປັນເພື່ອນກັບໝາ

(ພຣະຣາຊາຕັດຖາມບັນຫາວ່າ)

[໙໔] ແຕ່ໃດ ໆ ມາຄວາມເປັນເພື່ອນກັນ
ແມ່ນພຽງແຕ່ບາດກ້າວ ໗ ກ້າວ
ຂອງສັດເຫຼົ່າໃດບໍ່ເຄີຍມີມາແລ້ວໃນໂລກນີ້
ສັດເຫຼົ່ານັ້ນ ໒ ຕົວ ເຊິ່ງເປັນສັດຕູກັນກັບເປັນສະຫາຍກັນໄດ້
ປະພຶດກ່ຽວເນື່ອງກັນຍ້ອນເຫດໃດ

(ແລະຕັດຕໍ່ໄປວ່າ)

[໙໕] ຖ້າວ່າໃນເວລາອາຫານເຊົ້າຂອງເຮົາໃນວັນນີ້
ພວກທ່ານບໍ່ສາມາດຈະກ່າວແກ້ບັນຫາຂໍ້ນີ້ໄດ້
ເຮົາຈະເນຣະເທດພວກທ່ານທັງໝົດອອກຈາກແຄວ້ນ
ເພາະເຮົາບໍ່ຕ້ອງການພວກຄົນມີປັນຍາຊາມ

(ເສນະກະບັນດິດຂາບທູນວ່າ)

[໙໖] ເມື່ອມະຫາຊົນມາປະຊຸມກັນອືກກະທຶກຄຶກໂຄມ
ເມື່ອຄົນມາຮ່ວມກັນເປັນໂກລາຫົນ
ພວກຂ້າພຣະອົງກໍມີໃຈຟຸ້ງຊ່ານ ມີຈິດບໍ່ແນ່ວແນ່
ຈຶ່ງບໍ່ສາມາດຈະກ່າວແກ້ບັນຫາຂໍ້ນີ້ໄດ້

[໙໗] ຂໍເດຊະພຣະອົງຜູ້ຈອມຊົນ
ນັກປາດທັງຫຼາຍມີຈິດແນ່ວແນ່ໄປໃນທີ່ລັບຕາມລຳພັງ
ຄິດພິຈາລະນາເຖິງເນື້ອຄວາມໃນທີ່ສະຫງັດແລ້ວ
ພາຍຫຼັງຈຶ່ງຈະກ່າວຕອບເນື້ອຄວາມຂໍ້ນີ້ໄດ້

(ເສນະກະບັນດິດນັ້ນກ່າວຄາຖາຕາມແນວທີ່ຕົນຮຽນມາວ່າ)

[໙໘] ພວກບຸດຂອງຄົນຊັ້ນສູງແລະພວກຣາດຊະບຸດໂຜດປານພໍໃຈຊີ້ນແບ້
ພວກເຂົາບໍ່ບໍຣິໂພກຊີ້ນໝາ
ເມື່ອເປັນເຊັ່ນນັ້ນ ແບ້ກັບໝາຈຶ່ງເປັນເພື່ອນກັນ

(ປຸກກຸສະບັນດິດກ່າວຄາຖາຕາມແນວທີ່ຕົນຮຽນມາວ່າ)

[໙໙] ຊົນທັງຫຼາຍລອກໜັງແບ້ເຮັດເປັນເຄື່ອງລາດຫຼັງມ້າ
ເພາະນັ່ງສະບາຍ ແຕ່ພວກເຂົາບໍ່ປູລາດດ້ວຍໜັງໝາ
ເມື່ອເປັນເຊັ່ນນັ້ນ ແບ້ກັບໝາຈຶ່ງເປັນເພື່ອນກັນ

(ກາມິນທະບັນດິດກ່າວຄາຖາຕາມແນວທີ່ຕົນຮຽນມາວ່າ)

[໑໐໐] ກໍແບ້ມີເຂົາໂຄ້ງແລະມີຫຍ້າເປັນພັກສາ
ສ່ວນໝາບໍ່ມີເຂົາແລະກິນຊີ້ນ
ເມື່ອເປັນເຊັ່ນນັ້ນ ແບ້ກັບໝາຈຶ່ງເປັນເພື່ອນກັນ

(ເວທິນທະບັນດິດກ່າວຄາຖາຕາມແນວທີ່ຕົນຮຽນມາວ່າ)

[໑໐໑] ແບ້ກິນຫຍ້າກິນໃບໄມ້
ແຕ່ໝາບໍ່ກິນຫຍ້າບໍ່ກິນໃບໄມ້
ໝາຈັບກະຕ່າຍແລະແມວກິນ
ເມື່ອເປັນເຊັ່ນນັ້ນ ແບ້ກັບໝາຈຶ່ງເປັນເພື່ອນກັນ

(ມະໂຫສົດບັນດິດສະເຫຼີຍບັນຫາທີ່ຜາກົດແຈ້ງຄັກແກ່ຕົນວ່າ)

[໑໐໒] ແບ້ມີ ໔ ຕີນ ໗ ກີບ ໗ ເລັບ
ໝານີ້ແຝງກາຍນຳຫຍ້າມາເພື່ອແບ້ຕົວນີ້
ສ່ວນແບ້ນີ້ແຝງກາຍນຳເນື້ອມາເພື່ອໝາຕົວນັ້ນ

[໑໐໓] ໃນຍະວ່າ ພຣະອົງຜູ້ຈອມເທບປະເສີດກວ່າຊາວວິເທຫະ
ປະທັບຢູ່ໃນຜາສາດອັນປະເສີດ
ໄດ້ທອດພຣະເນດການແລກປ່ຽນອາຫານຂອງກັນແລະກັນໂດຍປະຈັກ
ແລະນັ້ນສຽງເຫົ່າຂອງໝາຕໍ່ໜ້າແບ້

(ພຣະຣາຊາຕັດວ່າ)

[໑໐໔] ເປັນລາບຂອງເຮົາບໍ່ແມ່ນໜ້ອຍແລ້ວນໍ
ທີ່ມີບັນດິດເຊັ່ນນີ້ຢູ່ໃນຣາດຊະສະກຸນ
ນັກປາດທັງຫຼາຍຮູ້ແຈ້ງເນື້ອຄວາມແຫ່ງບັນຫາ
ອັນລະອຽດເລິກເຊິ່ງໄດ້ໂດຍຕະຫຼອດ
ແລະກ່າວດ້ວຍຄຳເວົ້າອັນເປັນສຸພາສິດ

(ແລະຕັດອີກວ່າ)

[໑໐໕] ເຮົາມີຄວາມພໍໃຈຢ່າງຍິ່ງດ້ວຍຄຳເວົ້າອັນເປັນສຸພາສິດ
ເຮົາໃຫ້ລົດທຽມມ້າອັດສະດອນຄົນລະຄັນ
ບ້ານສ່ວຍທີ່ມັ່ງຄັ່ງຄົນລະ ໑ ເຂດ
ແກ່ທ່ານຜູ້ເປັນບັນດິດທຸກຄົນ

**ເມນທະກະປັນຫະຊາດົກທີ ໗ ຈົບ**

# ໙. ມະຫາປະທຸມະຊາດົກ (໕໗໒)
## ວ່າດ້ວຍມະຫາປະທຸມກຸມານ

(ພວກຜູ້ໃຫຍ່ມີກະສັດມະຫາສານເປັນຕົ້ນຕະຫຼອດຈົນອຳມາດຣາດຊະເສວະກະໄດ້ຂາບທູນວ່າ)

[໑໐໖] ໂທດນ້ອຍໃຫຍ່ຂອງຜູ້ອື່ນທັງໝົດທີ່ຍັງບໍ່ໄດ້ເຫັນ
ບໍ່ໄດ້ພິຈາລະນາດ້ວຍຕົນເອງ ຜູ້ໃຫຍ່ບໍ່ຄວນລົງທັນ

[໑໐໗] ສ່ວນຜູ້ໃດເປັນກະສັດຍັງບໍ່ໄດ້ຊົງພິຈາລະນາແລ້ວຊົງລົງອາດຍາ
ຜູ້ນັ້ນຊື່ວ່າກືນໂພຊະນາຫານພ້ອມທັງໜາມ
ເໝືອນຄົນຕາບອດແຕ່ກຳເນີດ ກືນກິນອາຫານທີ່ມີແມງວັນ

[໑໐໘] ພຣະຣາຊາພຣະອົງໃດລົງອາດຍາບຸກຄົນຜູ້ບໍ່ຄວນຈະລົງອາດຍາ
ບໍ່ລົງອາດຍາບຸກຄົນຜູ້ຄວນລົງອາດຍາ
ພຣະຣາຊາພຣະອົງນັ້ນບໍ່ຮູ້ສິ່ງສົມຄວນຫຼືບໍ່ສົມຄວນ
ເໝືອນຄົນຕາບອດເດີນທາງທີ່ຂຸຂະ

[໑໐໙] ອັນໜຶ່ງ ຖານະນ້ອຍໃຫຍ່ທັງໝົດເຫຼົ່ານີ້
ພຣະຣາຊາພຣະອົງໃດເຫັນຊັດເຈນດີແລ້ວສັ່ງການລົງໄປ
ພຣະຣາຊາພຣະອົງນັ້ນສົມຄວນຈະປົກຄອງຣາດຊະສົມບັດໄດ້

[໑໑໐] ພຣະຣາຊາຜູ້ອ່ອນໂຍນຢ່າງດຽວຫຼືຜູ້ແຂງກ້າວຢ່າງດຽວ
ບໍ່ສາມາດຈະດຳຣົງຕົນຢູ່ໃນຖານະອັນຍິ່ງໃຫຍ່ໄດ້
ຍ້ອນເຫດນັ້ນ ເພິ່ງປະພຶດທັງ ໒ ປະການ

[໑໑໑] ພຣະຣາຊາຜູ້ອ່ອນໂຍນກໍອາດຈະຖືກດູໝິ່ນ
ຜູ້ແຂງກ້າວກໍອາດຈະມີສັດຕູ
ເມື່ອຮູ້ເຫດທັງ ໒ ຢ່າງນີ້ແລ້ວ
ເພິ່ງປະພຶດພໍສົມຄວນເປັນກາງ ໆ ໄວ້

[໑໑໒] ຄົນມີຄວາມກຳໜັດເພິ່ງເວົ້າຫຼາຍ
ເຖິງຄົນມີຄວາມໂກດກໍເວົ້າຫຼາຍ
ຂໍເດຊະມະຫາຣາດ ພຣະອົງບໍ່ຄວນໃຫ້ປົງພະຊົນພຣະຣາດຊະໂອຣົດ
ຍ້ອນເຫດແຫ່ງແມ່ຍິງເລີຍ

(ຝ່າຍພຣະຣາຊາຜູ້ໂງ່ຈ້າຊົງສັ່ງລົງອາດຍາວ່າ)

[໑໑໓] ປະຊາຊົນເປັນຝ່າຍດຽວກັນທັງໝົດ
ຝ່າຍແມ່ຍິງນີ້ມີພຽງຄົນດຽວ
ຍ້ອນເຫດນັ້ນ ເຮົາຈະປະຕິບັດຕາມຄຳຂອງແມ່ຍິງນີ້
ພວກທ່ານຈົ່ງໄປ ຈົ່ງໂຍນປະທຸມກຸມານນັ້ນລົງເຫວໄປເທີ້ນ

(ຕໍ່ມາພຣະຣາຊາຕັດຖາມພຣະໂພທິສັດວ່າ)

[໑໑໔] ທີ່ຮ່ອມພູອັນເປັນເຫວເລິກຫຼາຍຊົ່ວລຳຕານ ຍາກທີ່ຈະຂຶ້ນມາໄດ້
ເຈົ້າຖືກຍູ້ຕົກລົງໄປໃນເຫວນັ້ນເປັນຫຍັງຈຶ່ງບໍ່ຕາຍ

(ພຣະໂພທິສັດຂາບທູນວ່າ)

[໑໑໕] ພະຍານາກເກີດຢູ່ທີ່ຮ່ອມພູນັ້ນ
ແຜ່ພັງພານ ມີກຳລັງ ໃຊ້ຂະນົດຮອງຮັບອາດຕະມາພາບ
ຍ້ອນເຫດນັ້ນ ອາດຕະມາພາບຈຶ່ງບໍ່ຕາຍໃນເຫວນັ້ນ

(ພຣະຣາຊາຕັດວ່າ)

[໑໑໖] ຣາດຊະບຸດ ມາເທີ້ນ ພໍ່ຈັກນຳເຈົ້າກັບພະຣາດຊະວັງຂອງຕົນ
ຂໍຄວາມຈະເລີນຈົ່ງມີແກ່ເຈົ້າ ເຈົ້າຈົ່ງຄອບຄອງຣາດຊະສົມບັດເທີ້ນ
ເຮັດຫຍັງຢູ່ໃນປ່ານໍ?

(ພຣະໂພທິສັດຂາບທູນວ່າ)

[໑໑໗] ອາດຕະມາພາບເບິ່ງເຫັນຕົນເໝືອນຄົນທີ່ກືນເບັດລົງໄປ
ຄວນດຶງເບັດທີ່ເປື້ອນເລືອດຂຶ້ນມາ
ເມື່ອດຶງຂຶ້ນມາແລ້ວເພິ່ງເປັນສຸກ

(ພຣະຣາຊາຕັດວ່າ)

[໑໑໘] ອັນໃດນໍ ເຈົ້າກ່າວວ່າ ເປັນເບັດ
ອັນໃດນໍ ເຈົ້າກ່າວວ່າ ເບັດເປື້ອນເລືອດ
ອັນໃດນໍ ເຈົ້າກ່າວວ່າ ຄວນດຶງອອກມາ
ເຮົາຖາມແລ້ວ ຂໍເຈົ້າຈົ່ງບອກຄວາມຂໍ້ນັ້ນ

(ພຣະໂພທິສັດຂາບທູນວ່າ)

[໑໑໗] ການ ອາດຕະມາກ່າວວ່າ ເປັນເບັດ
ຊ້າງແລະມ້າ ອາດຕະມາກ່າວວ່າ ເປັນເບັດທີ່ເປື້ອນເລືອດ
ການສະລະອອກໄດ້ແລ້ວ ອາດຕະມາກ່າວວ່າ ດຶງອອກມາແລ້ວ
ຂໍພຣະອົງຊົງຮູ້ແນວນີ້ເທີ້ນ ຈອມກະສັດ

(ພຣະສາດສະດາຊົງປະມວນຊາດົກດ້ວຍຄາຖາສຸດທ້າຍວ່າ)

[໑໘໐] ພຣະຣາດຊະມານດາ (ລ້ຽງ) ເປັນນາງຈິນຈະມານະວິກາ
ພຣະຣາດຊະບິດາຂອງອາດຕະມາເປັນພຣະເທວະທັດ
ພະຍານາກເປັນອານົນຜູ້ເປັນບັນດິດ
ເທວະດາເປັນພຣະສາລີບຸດ
ພຣະຣາດຊະບຸດຄືຕະຖາຄົດ
ຂໍທ່ານທັງຫຼາຍຊົງຈຳຊາດົກນີ້ໄວ້ແນວນີ້

**ມະຫາປະທຸມະຊາດົກທີ ໗ ຈົບ**

## ໑໐. ມິດຕາມິດຕະຊາດົກ (໔໗໔)
## ວ່າດ້ວຍລັກສະນະມິດແລະຜູ້ບໍ່ແມ່ນມິດ

(ພຣະຣາຊາຕັດຖາມພຣະໂພທິສັດວ່າ)

[໑໘໑] ວິນຍູຊົນຜູ້ເປັນນັກປາດ ເປັນບັນດິດ
ເຫັນຫຼືໄດ້ຍິນຜູ້ທຳວຽກງານອັນໃດແດ່
ຫຼືເພິ່ງພະຍາຍາມແນວໃດ
ຈຶ່ງຈະຮູ້ວ່າ ຜູ້ນີ້ບໍ່ແມ່ນມິດ

(ພຣະໂພທິສັດຂາບທູນລັກສະນະຜູ້ບໍ່ແມ່ນມິດວ່າ)

[໑໘໘] ຄົນຜູ້ບໍ່ແມ່ນມິດ ຄື ເຫັນເພື່ອນແລ້ວບໍ່ຍິ້ມແຍ້ມ ໑
ບໍ່ຍິນດີຈະສົນທະນາກັບເພື່ອນ ໑ ບໍ່ສົບຕາເພື່ອນ ໑ ເວົ້າຕໍ່ຕ້ານ ໑

[໑໘໔] ຄົບສັດຕູຂອງເພື່ອນ ໑ ບໍ່ຄົບເພື່ອນຂອງເພື່ອນ ໑
ຫ້າມປາມຄົນທີ່ສັນເສີນເພື່ອນ ໑ ສັນເສີນຄົນທີ່ດ່າເພື່ອນ ໑

[໑໘໔] ບໍ່ບອກຄວາມລັບແກ່ເພື່ອນ ໑
ບໍ່ຊ່ອຍປົກປິດຄວາມລັບຂອງເພື່ອນ ໑
ບໍ່ຍົກຍ້ອງການທຳຂອງເພື່ອນ ໑
ບໍ່ສັນເສີນປັນຍາຂອງເພື່ອນ ໑

[໑໘໕] ເມື່ອເພື່ອນຈິບຫາຍກັບພໍໃຈ ໑ ເມື່ອເພື່ອນຈະເລີນກັບບໍ່ພໍໃຈ ໑
ໄດ້ອາຫານທີ່ມີຣົດແປກມາກໍບໍ່ນຶກເຖິງເພື່ອນ ໑
ແຕ່ນັ້ນ ຍ່ອມຈະບໍ່ອະນຸເຄາະເພື່ອນວ່າ
ແນວໃດນໍ ເພື່ອນເຮົາເພິ່ງໄດ້ລາບຈາກບ່ອນນີ້ແດ່ ໑

[໑໘໖] ອາການ ໑໖ ຂໍ້ດັ່ງກ່າວມານີ້ມີຢູ່ແລ້ວໃນຄົນທີ່ບໍ່ແມ່ນມິດ
ເພິ່ງເປັນເຫດໃຫ້ບັນດິດໄດ້ເຫັນແລະໄດ້ຍິນແລ້ວຮູ້ໄດ້ວ່າບໍ່ແມ່ນມິດ

(ພຣະໂພທິສັດຂາບທູນລັກສະນະຂອງມິດວ່າ)

[໑໘໗] ວິນຍູຊົນຜູ້ເປັນນັກປາດ ເປັນບັນດິດ
ເຫັນຫຼືໄດ້ຍິນຜູ້ທຳວຽກງານອັນໃດແດ່
ຫຼືຊົນເພິ່ງພະຍາຍາມແນວໃດຈຶ່ງຮູ້ວ່າ ຜູ້ນັ້ນເປັນມິດ

(ໄດ້ກ່າວຄາຖາທີ່ເຫຼືອວ່າ)

[໑໘໗] ຄົນຜູ້ເປັນມິດ ຄື ເພື່ອນຈາກໄປກໍຄິດເຖິງ ໑
ເພື່ອນກັບມາກໍຍິນດີ ໑
ຢອກຫຼິ້ນຍິ້ມແຍ້ມຕໍ່ເພື່ອນ ໑
ຍິນດີຕອບສະໜອງດ້ວຍວາຈາທີ່ມ່ວນ ໑

[໑໘໙] ຄົບເພື່ອນຂອງເພື່ອນຝ່າຍດຽວ ໑ ບໍ່ຄົບສັດຕູຂອງເພື່ອນ ໑
ຫ້າມປາມຄົນທີ່ດ່າເພື່ອນ ໑ ສັນເສີນຄົນທີ່ຍົກຍ້ອງເພື່ອນ ໑

[໑໙໐] ບອກຄວາມລັບແກ່ເພື່ອນ ໑ ຊ່ອຍປົກປິດຄວາມລັບຂອງເພື່ອນ ໑
ຍົກຍ້ອງການທຳຂອງເພື່ອນ ໑ ສັນເສີນປັນຍາຂອງເພື່ອນ ໑

[໑໙໑] ເມື່ອເພື່ອນຈະເລີນກໍຍິນດີ ໑ ເມື່ອເພື່ອນຈິບຫາຍກໍບໍ່ຍິນດີ ໑
ໄດ້ອາຫານທີ່ມີຣົດແປກມາກໍນຶກເຖິງເພື່ອນ ໑
ແຕ່ນັ້ນ ຍ່ອມຈະອະນຸເຄາະເພື່ອນວ່າ
ແນວໃດນໍ ເພື່ອນຈະໄດ້ລາບຈາກບ່ອນນີ້ແດ່ ໑

[໑໓໘] ອາການ ໑໖ ຂໍ້ດັ່ງກ່າວມານີ້ມີຢູ່ແລ້ວໃນຄົນທີ່ເປັນມິດ
ເພິ່ງເປັນເຫດໃຫ້ບັນດິດໄດ້ເຫັນແລະໄດ້ຍິນແລ້ວຮູ້ໄດ້ວ່າເປັນມິດ

**ມິດຕາມິດຕະຊາດົກທີ ໑໐ ຈົບ**

## ລວມຊາດົກທີ່ມີໃນນິບາດນີ້ ຄື

໑. ຈູລະກຸນາລະຊາດົກ
໒. ສະມຸດທະວານິຊະຊາດົກ
໓. ຊະນະສັນທະຊາດົກ
໔. ໂກສິຍະຊາດົກ
໕. ມະຫາປະທຸມະຊາດົກ
໖. ພັດທະສາລະຊາດົກ
໗. ການະຊາດົກ
໘. ມະຫາກັນທະຊາດົກ
໙. ເມນທະກະປັນທະຊາດົກ
໑໐. ມິດຕາມິດຕະຊາດົກ

**ທະວາທະສະກະນິບາດ ຈົບ**

# ໑໓. ເຕຣະສະກະນິບາດ

## ໑. ອຳພະຊາດົກ (໔໗໔)

## ວ່າດ້ວຍມົນເສກໝາກມ່ວງ

(ພຣະຣາຊາຕັດຖາມຄົນເຝົ້າສວນໝາກມ່ວງວ່າ)

[໑] ທ່ານພົມມະຈາຣີ ເມື່ອກ່ອນ
ທ່ານໄດ້ນຳໝາກມ່ວງນ້ອຍໃຫຍ່ມາໃຫ້ເຮົາ
ບັດນີ້ ໝາກໄມ້ທັງຫຼາຍບໍ່ຜາກົດດ້ວຍມົນເຫຼົ່ານັ້ນ
ຂອງທ່ານເລີຍບໍ ທ່ານພາມ

(ມານົບຂາບທູນວ່າ)

[໒] ຂ້າພຣະອົງກຳລັງຄິດໄລ່ການໂຄຈອນຂອງດາວເລີກ
ຍັງບໍ່ເຫັນເລີກຍາມຜາກົດໃນມົນເລີຍ
ຂ້າພຣະອົງຈັກນຳໝາກມ່ວງມາຖວາຍໄດ້ຢ່າງແນ່ນອນ

(ພຣະຣາຊາຕັດຖາມວ່າ)

[໓]	ເມື່ອກ່ອນ ທ່ານບໍ່ເວົ້າເຖິງການໂຄຈອນຂອງດາວເລີກເລີຍ
ບໍ່ໄດ້ອ້າງເຖິງເລີກຍາມເລີຍ
ໄດ້ນຳໝາກມ່ວງທີ່ມີສີງາມ ກິ່ນຫອມ ຣົດແຊບ
ເປັນຈຳນວນຫຼາຍມາໃຫ້ເຮົາດ້ວຍຕົນເອງ

[໔]	ແມ່ນເມື່ອກ່ອນ ດ້ວຍການຈົ່ມມົນຂອງທ່ານ
ໝາກໄມ້ທັງຫຼາຍກໍຜາກົດມີ ທ່ານພາມ
ແຕ່ວັນນີ້ ທ່ານນັ້ນແມ່ນຈະຈົ່ມມົນຢູ່ ກໍບໍ່ສາມາດຈະເຮັດໃຫ້ສຳເລັດໄດ້
ສະພາບຂອງທ່ານນັ້ນ ມັນເກີດອັນໃດຂຶ້ນວັນນີ້

(ມານົບຂາບທູນວ່າ)

[໕]	ບຸດຄົນຈັນທານໄດ້ມອບມົນໃຫ້ແກ່ຂ້າພຣະອົງໂດຍຖືກຕ້ອງ
ແລະບອກສາເຫດທີ່ເຮັດໃຫ້ມົນເສື່ອມໄວ້ວ່າ
ຖ້າມີໃຜມາຖາມເຖິງຊື່ແລະໂຄດຂອງເຮົາແລ້ວເຈົ້າຢ່າປົກປິດ
ຖ້າປົກປິດຄວາມຈິງ ມົນກໍຈະເສື່ອມໄປ

[໖]	ຂ້າພຣະອົງນັ້ນຖືກພຣະອົງຜູ້ເປັນຈອມຊົນຕັດຖາມຂຶ້ນໃນໝູ່ຊົນ
ເກີດຄວາມລົບຫຼູ່ຄອບງຳແລ້ວຈຶ່ງໄດ້ຂາບທູນຄວາມພົ້ງພາດໄປວ່າ
ມົນເຫຼົ່ານີ້ເປັນຂອງພາມດັ່ງນັ້ນ
ຂ້າພຣະອົງມີມົນເສື່ອມສາແລ້ວ
ຈຶ່ງເປັນຄົນໜ້າສົງສານຮ້ອງໄຫ້ຢູ່

(ພຣະຣາຊາຊົງຕິຕຽນມານົບນັ້ນວ່າ)

[໗]	ຄົນຜູ້ຕ້ອງການນ້ຳຫວານເພິ່ງໄດ້ນ້ຳຫວານຈາກຕົ້ນໄມ້ໃດ
ຈະເປັນຕົ້ນໝາກທຸ່ງສາກໍຕາມ ຕົ້ນກະເດົາກໍຕາມ ຫຼືຕົ້ນທອງກວາວກໍຕາມ
ຕົ້ນໄມ້ນັ້ນເປັນຕົ້ນໄມ້ດີທີ່ສຸດຂອງເຂົາ

[໘]	ບຸກຄົນເພິ່ງຮູ້ແຈ້ງທຳຈາກຜູ້ໃດ ຈະເປັນກະສັດ
ພາມ ແພດ ສູດ ຈັນທານ ຫຼື ຄົນຖອກຂີ້ເຫຍື່ອກໍຕາມ
ຜູ້ນັ້ນເປັນຄົນສູງສຸດຂອງເຂົາ

[໙]	ທ່ານທັງຫຼາຍຈົ່ງລົງໂທດ ຄັ່ງນຕີ ແລ້ວຈົ່ງຈັບຄໍເຈົ້າຄົນຊົ່ວ
ຜູ້ທີ່ເຮັດປະໂຫຍດອັນສູງສຸດເຊິ່ງຕົນໄດ້ມາແສນຍາກໃຫ້ພິນາດໄປ
ຍ້ອນຄວາມຈອງຫອງແລະດູໝິ່ນຄົນ ຈົ່ງໄສຫົວອອກໄປ

(ມານົບກ່າວຂໍຮຽນມົນໃໝ່ກັບອາຈານວ່າ)

[໑໐] ບຸຣຸດສຳຄັນພື້ນທີ່ວ່າຣາບພຽງ ເພິ່ງຕົກສ້າງ ຕົກຖໍ້າ ຕົກເຫວ
ຕົກຂຸມຮາກໄມ້ໂດກ ຫຼື ວ່າຄົນຕາບອດສຳຄັນວ່າເຊືອກ
ເພິ່ງຢຽບງູເຫົ່າ ຢຽບໄຟສັນໃດ ທ່ານຜູ້ມີປັນຍາເພິ່ງຮັບຮູ້ວ່າ
ຂ້າພະເຈົ້າພາດໄປແລ້ວສັນນັ້ນຄືກັນ ທ່ານອາຈານຮູ້ແລ້ວ
ຈົ່ງມອບມົນໃຫ້ແກ່ຂ້າພະເຈົ້າຜູ້ມີມົນເສື່ອມແລ້ວອີກເທີ້ນ

(ຕໍ່ຈາກນັ້ນ ອາຈານກ່າວວ່າ)

[໑໑] ເຮົາໄດ້ມອບມົນໃຫ້ແກ່ເຈົ້າໂດຍທຳ
ເຖິງເຈົ້າກໍຮຽນເອົາໂດຍທຳ
ແມ່ນສາເຫດທີ່ເຮັດໃຫ້ມົນເສື່ອມ ເຮົາກໍເຕັມໃຈບອກແກ່ເຈົ້າ
ຖ້າເຈົ້າຕັ້ງຢູ່ໃນທຳແລ້ວ ມົນຈະບໍ່ເສື່ອມ

[໑໒] ເຈົ້າຄົນໂງ່ ຄົນທີ່ມີປັນຍາໜ້ອຍ
ເຖິງຈະລ້ຽງຊີວິດຢູ່ໄດ້ໃນມະນຸດໂລກທຸກວັນນີ້
ດ້ວຍມົນທີ່ຕົນໄດ້ມາໂດຍຍາກ ໄດ້ມາດ້ວຍຄວາມລຳບາກກໍຈິງ
ແຕ່ເມື່ອເວົ້າໂລເລກໍເຮັດມົນບົດນັ້ນໃຫ້ເສື່ອມໄປໄດ້

[໑໓] ສຳລັບເຈົ້າຜູ້ເປັນຄົນໂງ່ ຫຼົງງົມງວາຍ
ອະກະຕັນຍູ ເວົ້າຕົວະ ບໍ່ຣະມັດຣະວັງ
ເຮົາຈະບໍ່ໃຫ້ມົນທັງຫຼາຍເຊັ່ນນັ້ນອີກ
ເຈົ້າຈົ່ງກັບໄປສາເທີ້ນ ເຮົາບໍ່ຕ້ອງການເຫັນເຈົ້າອີກ

**ອຳພະຊາດົກທີ ໑ ຈົບ**

## ໒. ຜັນທະນະຊາດົກ (໔໗໕)
## ວ່າດ້ວຍການຜູກເວນຂອງໝີແລະໄມ້ຄໍ້

(ໝີໄດ້ບອກຊ່າງໄມ້ວ່າ)

[໑໔] ທ່ານຜູ້ດຽວຖືຂວານເຂົ້າມາເຖິງປ່າຢືນຢູ່
ເພື່ອນ ເຮົາຖາມແລ້ວທ່ານຈົ່ງບອກ
ທ່ານຕ້ອງການຈະຕັດໄມ້ບໍ?

(ຊ່າງໄມ້ໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໑໕] ເພື່ອນ ເຈົ້າເປັນໝີທ່ຽວໄປສູ່ປ່ານ້ອຍໃຫຍ່
ທັງປ່າທຶບແລະປ່າໂປ່ງ ເຮົາຖາມແລ້ວ ເຈົ້າຈົ່ງບອກ
ຕົ້ນໄມ້ໃດມີເນື້ອແຂງສຳລັບກົງລົດ

(ໝີກ່າວວ່າ)

[໑໖] ຕົ້ນຮັງກໍດີ ຕົ້ນແຄນກໍດີ ຕົ້ນຫູກວາງກໍດີ ຕົ້ນສີສຽດກໍດີ
ເປັນຕົ້ນໄມ້ເນື້ອແຂງ ແຕ່ຕົ້ນໄມ້ທີ່ມີນາມວ່າໄມ້ຄໍ້ນັ້ນ
ເປັນໄມ້ທີ່ແຂງກວ່າເໝາະສຳລັບກົງລົດ

(ຊ່າງໄມ້ຖາມວ່າ)

[໑໗] ກໍຕົ້ນຄໍ້ນັ້ນ ໃບກໍຕາມ ລຳຕົ້ນກໍຕາມເປັນແນວໃດ
ເພື່ອນ ເຮົາຖາມແລ້ວ ທ່ານຈົ່ງຕອບ
ເຮົາຈະຮູ້ຈັກຕົ້ນຄໍ້ໄດ້ແນວໃດ?

(ໝີບອກວ່າ)

[໑໘] ຕົ້ນໄມ້ໃດທີ່ງ່າຫ້ອຍໂນ້ມລົງມາແຕ່ບໍ່ຫັກ
ເມື່ອຂ້າພະເຈົ້າຢືນຢູ່ເຫງົ້າຕົ້ນໄມ້ໃດ
ຕົ້ນໄມ້ນັ້ນມີນາມວ່າໄມ້ຄໍ້
[໑໙] ຕົ້ນຄໍ້ນີ້ຈັກເປັນໄມ້ທີ່ສົມຄວນ
ແກ່ກິດຈະການຂອງທ່ານທຸກຢ່າງ
ຄື ເຮັດເພົາກໍໄດ້ ລໍ້ກໍໄດ້ ດຸມກໍໄດ້
ງອນໄຖກໍໄດ້ ຕົວລົດກໍໄດ້

(ພຣະສາດສະດາຊົງປະກາດເລື້ອງນັ້ນວ່າ)

[໔໐] ທັນໃດນັ້ນ ຣຸກຂະເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນຄໍ້
ກໍໄດ້ກ່າວແນວນີ້ວ່າ ເຖິງຂ້າພະເຈົ້າກໍມີຄຳທີ່ຈະເວົ້າ
ພາລະທະວາຊະ ໂຜດຟັງຄຳຂອງຂ້າພະເຈົ້າ

[໔໑] ທ່ານຈົ່ງລອກໜັງຈາກຄໍໝີ ໔ ອົງຄຸລີແລ້ວໃຊ້ຫຸ້ມກົງລົດ
ເມື່ອເຮັດເຊັ່ນນີ້ ກົງລົດຈະໝັ້ນຄົງຍິ່ງຂຶ້ນ

[๔๔] ເຖິງຣຸກຂະເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນຄໍ້
ໄດ້ຈອງເວນແລ້ວພຽງນັ້ນ
ໄດ້ນຳຄວາມທຸກມາໃຫ້ແກ່ພວກໜີ
ທັງທີ່ເກີດແລ້ວແລະຍັງບໍ່ເກີດ ດ້ວຍປະການແບບນີ້

[໔໑] ດັ່ງນັ້ນ ໄມ້ຄໍ້ໄດ້ຍຸແຍ່ໃຫ້ຄົນຂ້າໜີ
ສ່ວນໜີຍຸແຍ່ໃຫ້ຄົນຕັດຕົ້ນຄໍ້
ຍ້ອນການວິວາທະກັນແລະກັນ
ຕ່າງຄົນຕ່າງຍຸແຍ່ໃຫ້ຂ້າກັນແລະກັນ ຄື

[໔໔] ພວກມະນຸດເກີດການຜິດຖຽງກັນຂຶ້ນບ່ອນໃດ
ບ່ອນນັ້ນມະນຸດທັງຫຼາຍກໍເປີດເຜີຍຄວາມລັບເໝືອນນົກຍູງຣໍາແພນ
ແລະເໝືອນໜີກັບໄມ້ຄໍ້ເຫຼົ່ານັ້ນ

[໔໕] ຍ້ອນເຫດນັ້ນ ຕະຖາຄົດຂໍຖວາຍພຣະພອນມະຫາບໍພິດທັງຫຼາຍ
ຂໍມະຫາບໍພິດທັງຫຼາຍຊົງພຣະຈະເລີນ
ຕາບເທົ່າທີ່ຊົງສະມາຄົມກັນໃນສະຖານທີ່ນີ້
ຂໍຊົງຣື່ນເຣີງບັນເທີງພຣະຫະໄທ ຢ່າຊົງວິວາທະກັນ
ຢ່າຊົງເປັນເໝືອນໜີກັບໄມ້ຄໍ້ເລີຍ

[໔໖] ຂໍມະຫາບໍພິດທັງຫຼາຍຊົງຕັ້ງໃຈຮູ້ເຖິງຄວາມສາມັກຄີນັ້ນ
ທີ່ພຣະພຸດທະເຈົ້າທັງຫຼາຍຊົງສັນເສີນແລ້ວ
ບຸກຄົນຜູ້ຍິນດີແລ້ວໃນຄວາມສາມັກຄີ ດຳຣົງຢູ່ໃນທຳ
ຍ່ອມບໍ່ເສື່ອມຈາກນິບພານອັນເປັນແດນກະເສມຈາກໂຍຄະ

**ຜັນທະນະຊາດົກທີ ໔ ຈົບ**

## ๑. ຊະວະນະຫັງສະຊາດົກ (๔๓๖)

## ວ່າດ້ວຍພະຍາຊະວະນະຫົງ

(ພຣະຣາຊາຊົງເຊື້ອເຊີນຊະວະນະພະຍາຫົງໂພທິສັດວ່າ)

[໔໗] ເຈົ້າຈັບຢູ່ທີ່ຕັ່ງຄໍານີ້ພະຍາຫົງ
ຂ້າພະເຈົ້າພໍໃຈທີ່ຈະເຫັນທ່ານ

ທ່ານມາເປັນເຈົ້າຂອງສະຖານທີ່ນີ້ແລ້ວ
ສິ່ງທີ່ມີຢູ່ໃນພຣະຣາດຊະນິເວດນີ້
ທ່ານບໍ່ຮັງກຽດ ຈົ່ງບອກມາໃຫ້ເຮົາຮູ້

(ແລະຊົງຂໍຮ້ອງວ່າ)

[໔໗] ຍ້ອນການຟັງ ຄົນບາງໝູ່ຈຶ່ງເປັນທີ່ຮັກຂອງຄົນບາງຄົນ
ຍ້ອນໄດ້ເຫັນ ຄວາມພໍໃຈຂອງຄົນບາງຄົນຈຶ່ງເສື່ອມຄາຍ
ຍ້ອນໄດ້ເຫັນແລະຍ້ອນໄດ້ຟັງ ຄົນບາງໝູ່ຈຶ່ງເປັນທີ່ຮັກ
ຍ້ອນການເຫັນ ທ່ານຮັກແພງຂ້າພະເຈົ້າແດ່ບໍ

[໔໘] ຍ້ອນການຟັງ ທ່ານຈຶ່ງເປັນທີ່ຮັກຂອງຂ້າພະເຈົ້າ
ແລະເປັນທີ່ຮັກຍິ່ງ ຍ້ອນໄດ້ມາພົບກັນ
ພະຍາຫົງ ທ່ານເປັນທີ່ໜ້າຮັກໜ້າເບິ່ງແນວນີ້ສຳລັບຂ້າພະເຈົ້າ
ຂໍທ່ານຈົ່ງຢູ່ໃກ້ ໆ ຂ້າພະເຈົ້າເທີ້ນ

(ພຣະໂພທິສັດກ່າວວ່າ)

[໕໐] ຂ້າພະເຈົ້າໄດ້ຮັບສັກກາຣະບູຊາຢູ່ເປັນນິດ
ເພິ່ງຢູ່ໃນພຣະຣາດຊະນິເວດຂອງພຣະອົງ
ແຕ່ບາງເວລາພຣະອົງຊົງມຶນເມົາ
ຈະເພິ່ງຕັດວ່າ ຈົ່ງກ້າວພະຍາຫົງ

(ພຣະຣາຊາຕັດໃຫ້ປະຕິຍານວ່າ)

[໕໑] ໜ້າຕິຕຽນແທ້ ການດື່ມນ້ຳເມົາ
ເຊິ່ງເປັນທີ່ພໍໃຈຂອງຂ້າພະເຈົ້າຍິ່ງກວ່າທ່ານ
ເອົາເທີ້ນ ຂ້າພະເຈົ້າຈະບໍ່ດື່ມນ້ຳເມົາ
ຕະຫຼອດເວລາທີ່ທ່ານຢູ່ໃນນິເວດຂອງຂ້າພະເຈົ້າ

(ພຣະໂພທິສັດກ່າວວ່າ)

[໕໔] ຂໍເດຊະພຣະຣາຊາ ສຽງຂອງເຫຼົ່າໝາຈອກເທົ່າຫອນກໍດີ
ສຽງເຫຼົ່ານົກຮ້ອງຂັນກໍດີ ຮູ້ໄດ້ງ່າຍ
ສ່ວນຄຳເວົ້າທີ່ພວກມະນຸດເປ່ງອອກມາ ຮູ້ໄດ້ຍາກກວ່ານັ້ນ

[໓໓]　ຄົນບາງຄົນເບື້ອງຕົ້ນເປັນຄົນໃຈດີ ຍ່ອມນັບຖືກັນວ່າ
　ເປັນຍາດ ເປັນມິດ ຫຼືເປັນເພື່ອນຢ່າງນີ້ແດ່
　ພາຍຫຼັງກາຍເປັນສັດຕູໄປກໍມີ

[໓໔]　ໃຈຈິດຈໍ່ຢູ່ໃນຜູ້ໃດ ຜູ້ນັ້ນແມ່ນຈະຢູ່ໄກກັນກໍເໝືອນຢູ່ໃກ້
　ໃຈເຫີນຫ່າງຈາກຜູ້ໃດ ຜູ້ນັ້ນແມ່ນຈະຢູ່ໃກ້ກໍເໝືອນຢູ່ໄກ
[໓໕]　ສະຫາຍຜູ້ມີຈິດເຫຼື້ອມໃສ ເຖິງຈະຢູ່ຍັງຟາກຝັ່ງມະຫາສະມຸດ
　ຖ້າມີຈິດເຫຼື້ອມໃສຕໍ່ກັນ ກໍຊື່ວ່າຢູ່ໃກ້ກັນ
　ສ່ວນສະຫາຍຜູ້ມີຈິດຄິດປະທຸດສະຮ້າຍເຖິງຈະຢູ່ໃກ້
　ຖ້າມີຈິດຄິດປະທຸດສະຮ້າຍຕໍ່ກັນ
　ກໍຊື່ວ່າຢູ່ຫ່າງອີກຟາກຝັ່ງຂອງມະຫາສະມຸດ
[໓໖]　ຂໍເດຊະພຣະອົງຜູ້ຈອມທັບ ຜູ້ຜະດຸງຣັດໃຫ້ຈະເລີນ
　ສັດຕູເຖິງຈະຢູ່ຮ່ວມກັນ ກໍຊື່ວ່າຢູ່ຫ່າງໄກກັນ
　ສ່ວນບັນດິດເຖິງຈະຢູ່ໄກກັນ
　ກໍຊື່ວ່າຢູ່ໃກ້ ເພາະມີໃຈນຶກເຖິງກັນ
[໓໗]　ຍ້ອນການຢູ່ຮ່ວມກັນນານເກີນໄປ
　ຄົນທີ່ຮັກກັນກໍຈະກາຍເປັນບໍ່ຮັກກັນ
　ຍ້ອນເຫດນັ້ນ ຂ້າພຣະອົງຂໍທູນລາໄປ
　ກ່ອນທີ່ຈະບໍ່ເປັນທີ່ຮັກຂອງພຣະອົງ

(ພຣະຣາຊາຕັດກັບພຣະໂພທິສັດວ່າ)

[໓໘]　ຫາກການປະຄອງອັນຊະລີຂອງຂ້າພະເຈົ້າຜູ້ວິງວອນຢູ່ແນວນີ້
　ທ່ານບໍ່ຮູ້ແລະບໍ່ເຮັດຕາມຄຳຂອງຂ້າພະເຈົ້າຜູ້ປົນນິບັດຢູ່ແນວນີ້
　ເມື່ອເປັນເຊັ່ນນັ້ນ ຂ້າພະເຈົ້າຂໍຮ້ອງທ່ານວ່າ ໂຜດແວ່ວຽນມາອີກ

(ລຳດັບນັ້ນ ພຣະໂພທິສັດກ່າວວ່າ)

[໓໙]　ຂໍເດຊະພຣະມະຫາຣາດ ຜູ້ຜະດຸງຣັດໃຫ້ຈະເລີນ
　ຫາກເຮົາທັງຫຼາຍຍັງຢູ່ປົກກະຕິແນວນີ້
　ແມ່ນພຣະອົງແລະຂ້າພຣະອົງກໍຈັກບໍ່ມີອັນຕະລາຍ
　ວັນຄືນຕໍ່ ໆ ໄປ ເຮົາຄົງຈະໄດ້ພົບກັນແດ່ດອກ

**ຊະວະນະຫັງສະຊາດົກທີ ໑ ຈົບ**

# ໔. ຈູລະນາຣະທະກັດສະປະຊາດົກ (໕ກຖາ)
## ວ່າດ້ວຍກັດສະປະດາບົດສອນຈູລະນາຣະທະດາບົດ

(ພຣະໂພທິສັດຖາມລູກຊາຍວ່າ)

[໔໐] ຟືນລູກກໍບໍ່ໄດ້ຜ່າ ນ້ຳລູກກໍບໍ່ໄດ້ຕັກ
ແມ່ນໄຟລູກກໍບໍ່ໄດ້ດັງໃຫ້ສະຫວ່າງຮຸ່ງແຈ້ງຂຶ້ນ
ເປັນຫຍັງນໍ ລູກຈຶ່ງຊຶບເຊົາເຫງົາຢູ່ເໝືອນຄົນປັນຍາອ່ອນ

(ດາບົດກຸມານຕອບວ່າ)

[໔໑] ພໍ່ກັດສະປະ ລູກໝົດຄວາມພະຍາຍາມທີ່ຈະຢູ່ປ່າຕໍ່ໄປ
ຂໍຂາບລາພໍ່ ການຢູ່ໃນປ່າລຳບາກ
ລູກຕ້ອງການຈະໄປສູ່ເມືອງ

[໔໒] ພໍ່ພາມ ລູກໄປຈາກບ່ອນນີ້ແລ້ວ
ໄປຢູ່ຊົນນະບົດໃດຊົນນະບົດໜຶ່ງ
ເພິ່ງສຶກສາອາຈາຣະອັນເປັນປະເພນີທີ່ຄວນສຶກສາ
ຂໍພໍ່ກະລຸນາສອນທຳນັ້ນໃຫ້ລູກດ້ວຍ

(ພຣະໂພທິສັດກ່າວວ່າ)

[໔໓] ຖ້າລູກຖິ້ມປ່າແລະມູນຜະລາຫານໃນປ່າ
ພໍໃຈການຢູ່ໃນເມືອງ
ລູກຈົ່ງຕັ້ງໃຈຟັງທຳນັ້ນຈາກພໍ່

[໔໔] ຢ່າເສບຂອງມີພິດ ໑ ຈົ່ງເວັ້ນເຫວເລີກໃຫ້ຫ່າງໄກ ໑
ຢ່າຈົມລົງໃນເປືອກຕົມ ໑ ເພິ່ງຣະມັດຣະວັງເມື່ອຢູ່ໃກ້ອະສໍຣະພິດ ໑

(ດາບົດກຸມານເມື່ອບໍ່ຮູ້ຄວາມໝາຍຂອງຄຳທີ່ພໍ່ກ່າວໂດຍຫຍໍ້ ຈຶ່ງຖາມວ່າ)

[໔໕] ອັນໃດນໍຄືຂອງມີພິດ ເຫວ
ຫຼື ເປືອກຕົມ ສຳລັບຜູ້ປະພຶດພົມມະຈັນ
ອັນໃດທີ່ພໍ່ກ່າວວ່າ ເປັນອະສໍຣະພິດ
ລູກຖາມແລ້ວ ຂໍພໍ່ຈົ່ງບອກເລື້ອງນັ້ນ

(ຝ່າຍພຣະໂພທິສັດຕອບວ່າ)

[໘໖] ທ້າວນາຣະທະ ຂອງໜັກດອງໃນໂລກທີ່ເຂົາຮຽກຊື່ວ່າສຸຣາ
ເຮັດໃຈໃຫ້ຮຶກເຫີມ ມີກິ່ນຫອມ ໜ້າພໍໃຈ ມີຣົດແຊບເໝືອນນໍ້າເຜິ້ງ
ສຸຣານັ້ນ ພຣະອະຣິຍະທັງຫຼາຍກ່າວວ່າ
ເປັນຂອງມີພິດສຳລັບພົມມະຈັນ

[໘໗] ທ້າວນາຣະທະ ຍິງທັງຫຼາຍໃນໂລກຍ່ອມຍໍ່າຍີຊາຍຜູ້ຜະໝາດແລ້ວ
ພວກນາງຍ່ອມດຶງຈູງຈິດຂອງຊາຍໜຸ່ມໄປ
ເໝືອນລົມພັດປຸຍນຸ່ນທີ່ພາດຕົກຈາກຕົ້ນ
ສະພາບນັ້ນບັນດິດທັງຫຼາຍກ່າວວ່າ
ເປັນເຫວສຳລັບພົມມະຈັນ

[໘໘] ລາບ ໑ ຄວາມມີຊື່ສຽງ ໑ ສັກກາຣະ ໑
ການບູຊາໃນສະກຸນອື່ນ ໆ ໑
ທ້າວນາຣະທະ ນີ້ແລບັນດິດທັງຫຼາຍກ່າວວ່າ
ເປັນເປືອກຕົມຂອງພົມມະຈັນ

[໘໙] ທ້າວນາຣະທະ ພຣະຣາຊາທັງຫຼາຍຊົງມີສັດຕາວຸດ
ຊົງປົກຄອງແຜ່ນດິນນີ້
ພຣະຣາຊາຜູ້ຈອມມະນຸດ ຜູ້ຍິ່ງໃຫຍ່ເຊັ່ນນັ້ນ
ເຈົ້າຄວນຣະວັງ

[໙໐] ທ້າວນາຣະທະ ພຣະຣາຊາຜູ້ເປັນອິດສະຫຼະ ເປັນອະທິບໍດີເຫຼົ່ານັ້ນ
ເຈົ້າຢ່າຢູ່ໃກ້ຊິດເລີຍ
ພຣະຣາຊານີ້ແລບັນດິດທັງຫຼາຍກ່າວວ່າ
ເປັນອະສໍຣະພິດສຳລັບພົມມະຈັນ

[໙໑] ອັນໜຶ່ງ ຄົນຜູ້ຕ້ອງການອາຫານໃນເວລາອາຫານ
ເພິ່ງເຂົ້າໄປສູ່ເຮືອນຫຼັງໃດຫຼັງໜຶ່ງ
ບັນດາເຮືອນເຫຼົ່ານີ້ ເຈົ້າເພິ່ງທ່ຽວສະແຫວງຫາອາຫານ
ໃນເຮືອນຫຼັງທີ່ຕົນຮູ້ວ່າດີງາມ

[໙໒] ເມື່ອເຂົ້າໄປສູ່ສະກຸນອື່ນເພື່ອປະໂຫຍດແກ່ນໍ້າຫຼືໂພຊະນາຫານ
ຄວນຂົບຄ້ຽວບໍຣິໂພກແຕ່ພໍປະມານ ບໍ່ຄວນໃຝ່ໃຈໃນຮູບ

[໕໓] ຄອກງົວ ໑ ໂຮງສຸຣາ ໑ ບັກເລງ ໑ ທໍປະຊຸມ ໑
ສະຖານທີ່ເກັບເງິນຄໍາ ໑ ເຈົ້າຈົ່ງເວັ້ນໃຫ້ຫ່າງໄກ
ເໝືອນຄົນຂັບຍານພາຫະນະເວັ້ນຫົນທາງທີ່ຊຸຂະ

**ຈູລະນາຣະທະກັດສະປະຊາດົກທີ ໔ ຈົບ**

## ໕. ທູຕະຊາດົກ (໔໗໘)
## ວ່າດ້ວຍບຸກຄົນຜູ້ເປັນທູດ

(ພຣະຣາຊາຕັດຖາມພຣະໂພທິສັດວ່າ)

[໕໔] ທ່ານພາມ ຂ້າພະເຈົ້າສົ່ງທູດໄປຫາທ່ານ
ເຊິ່ງກໍາລັງເຂົ້າຊານຢູ່ທີ່ແຄມຝັ່ງແມ່ນ້ຳຄົງຄາ
ພວກເຂົາຖາມແລ້ວທ່ານກໍບໍ່ຕອບ
ທຸກຂອງທ່ານນັ້ນເປັນຄວາມລັບບໍ

(ພຣະໂພທິສັດຂາບທູນວ່າ)

[໕໕] ພຣະອົງຜູ້ຜະດຸງຣັດໃຫ້ຈະເລີນຂອງຊາວແຄວ້ນກາສີ
ຖ້າຄວາມທຸກເພິ່ງເກີດຂຶ້ນແກ່ພຣະອົງ
ພຣະອົງຢ່າຕັດບອກຄວາມທຸກນັ້ນແກ່ຄົນ
ທີ່ຊ່ອຍປົດເປື້ອງພຣະອົງໃຫ້ພົ້ນຈາກຄວາມທຸກບໍ່ໄດ້

[໕໖] ຜູ້ໃດເພິ່ງຊ່ອຍປົດເປື້ອງໃຫ້ພົ້ນສ່ວນແຫ່ງຄວາມທຸກ
ທີ່ເກີດແລ້ວນັ້ນໄດ້ ແມ່ນສ້ງອໜຶ່ງໂດຍທໍາ
ຜູ້ນັ້ນຄວນບອກໃຫ້ຮູ້ໂດຍແທ້

[໕໗] ຂໍເດຊະພຣະຣາຊາ ສຽງເຫຼົ່າໝາຈອກເຫົ່າຫອນກໍດີ
ສຽງເຫຼົ່ານົກຮ້ອງຂັນກໍດີ ຮູ້ໄດ້ງ່າຍ
ສ່ວນຄໍາເວົ້າທີ່ພວກມະນຸດເປ່ງອອກມາ ຮູ້ໄດ້ຍາກກວ່ານັ້ນ

[໕໘] ຄົນບາງຄົນເບື້ອງຕົ້ນເປັນຄົນໃຈດີ ຍ່ອມນັບຖືກັນວ່າ
ເປັນຍາດ ເປັນມິດ ຫຼືເປັນເພື່ອນແນວນີ້ແດ່
ພາຍຫຼັງກາຍເປັນສັດຕູໄປກໍມີ

[໕໙] ຄົນໃດຖືກເຂົາຖາມເຖິງຄວາມທຸກຂອງຕົນຢູ່ເລື້ອຍ ໆ
ເພິ່ງບອກໃຫ້ຮູ້ໃນເວລາອັນບໍ່ສົມຄວນ
ພວກສັດຕູຂອງຄົນນັ້ນຍ່ອມພໍໃຈ
ສ່ວນຄົນທີ່ຫວັງປະໂຫຍດຕໍ່ເຂົາຍ່ອມເປັນທຸກ

[໖໐] ສ່ວນນັກປາດຮູ້ການອັນສົມຄວນ
ຮູ້ຄວາມມີໃຈຂອງພວກມີປັນຍາເປັນອັນດຽວກັບຕົນແລ້ວ
ເພິ່ງບອກຄວາມທຸກອັນແຮງກ້າແກ່ຄົນອື່ນຊະນິດນັ້ນ
ເພິ່ງເປ່ງຄໍາເວົ້າອັນອ່ອນຫວານ ມີປະໂຫຍດ

[໖໑] ອັນໜຶ່ງ ຖ້ານັກປາດເພິ່ງຮູ້ເຖິງທຸກທີ່ທົນບໍ່ໄດ້ຂອງຕົນວ່າ
ໂລກກະທໍາເຫຼົ່ານັ້ນເກີດຂຶ້ນ
ເພື່ອບໍ່ໃຫ້ເຖິງຄວາມສຸກສະເພາະເຮົາທໍ່ນັ້ນກໍຫາບໍ່ໄດ້
ເພິ່ງເພ່ງເຖິງສັດຈະ ຫິຣິ ແລະໂອດຕັບປະທໍ່ນັ້ນ
ອົດກັ້ນຄວາມທຸກອັນແຮງກ້າພຽງຜູ້ດຽວ

(ພຣະໂພທິສັດຂາບທູນອີກວ່າ)

[໖໒] ຂໍເດຊະພຣະມະຫາຣາດ ຂ້າພຣະອົງຕ້ອງການຊັບເພື່ອໃຫ້ອາຈານ
ຈຶ່ງທ່ອງທ່ຽວໄປຂໍຍັງແວ່ນແຄວ້ນ ນິຄົມ ແລະຣາດຊະທານີຕ່າງ ໆ

[໖໓] ຂໍເດຊະພຣະມະຫາຣາດ ຜູ້ຊົງເປັນໃຫຍ່ແຫ່ງໝູ່ຊົນ
ຂ້າພຣະອົງໄດ້ຂໍກັບພວກຄະຫະບໍດີ ຣາດຊະບຸຣຸດ
ແລະພາມມະຫາສານ ຈຶ່ງໄດ້ຄໍາມາ ໗ ແທ່ງ
ຄໍາເຫຼົ່ານັ້ນຂອງຂ້າພຣະອົງສູນຫາຍສາແລ້ວ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງເສົ້າໂສກຫຼາຍ

[໖໔] ຂໍເດຊະພຣະມະຫາຣາດ ຄົນເຫຼົ່ານັ້ນຂ້າພຣະອົງຄິດໄຕຣ່ຕອງເບິ່ງ
ແລ້ວວ່າ ບໍ່ສາມາດຈະຊ່ອຍປົດເປື້ອງທຸກໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງບໍ່ບອກແກ່ເຂົາເຫຼົ່ານັ້ນ

[໖໕] ຂໍເດຊະພຣະມະຫາຣາດສ່ວນພຣະອົງ
ຂ້າພຣະອົງຄິດໄຕຣ່ຕອງເບິ່ງ
ແລ້ວວ່າ ສາມາດຈະຊ່ອຍປົດເປື້ອງທຸກໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງຂາບທູນໃຫ້ພຣະອົງຊົງຮູ້

(ພຣະສາດສະດາຕັດພຣະຄາຖາສຸດທ້າຍວ່າ)

[໒໖]　ພຣະຣາຊາຜູ້ຜະດຸງຣັດໃຫ້ຈະເລີນຂອງຊາວແຄວ້ນກາສີ
ມີພຣະຫະໄທເຫຼື້ອມໃສໄດ້ພຣະຣາດຊະທານຄຳແທ້ ໆ ແກ່ເຂົາ ໑໔ ແຫ່ງ

**ທູຕະຊາດົກທີ ໔ ຈົບ**

# ໖. ກາລິງຄະໂພທິຊາດົກ (໔໗໙)
# ວ່າດ້ວຍພຣະເຈົ້າກາລິງຄະຊົງບູຊາໂພທິມົນທົນ

(ພຣະສາດສະດາຊົງປະກາດເລື້ອງນີ້ວ່າ)

[໒໗]　ພຣະເຈົ້າຈັກກະພັດພະນາມວ່າກາລິງຄະ
ຊົງປົກຄອງແຜ່ນດິນໂດຍທຳ
ຊົງພະຍາຊ້າງແກ້ວເຊິ່ງມີອານຸພາບຫຼາຍ
ໄດ້ສະເດັດໄປໃກ້ໂພທິພຶກ

[໒໘]　ພາມປຸໂຣຫິດພາລະທະວາຊະ
ຊາວກາລິງຄະພິຈາລະນາເບິ່ງພູມິພາກ
ແລ້ວປະຄອງອັນຊະລີ ໄດ້ຂາບທູນພຣະຣາຊາ
ພະນາມວ່າກາລິງຄະ ຜູ້ເປັນໂອຣົດຂອງພຣະດາບິດວ່າ

[໒໙]　ຂໍເດຊະພຣະມະຫາຣາດ ຂໍພຣະອົງສະເດັດລົງມາເທີ້ນ
ສະຖານທີ່ນີ້ເປັນພູມິພາກທີ່ພຣະພຸດທະເຈົ້າທຸກພຣະອົງຊົງຍ້ອງຍໍແລ້ວ
ເພາະສະຖານທີ່ນີ້ ພຣະພຸດທະເຈົ້າທັງຫຼາຍຜູ້ລ້ຳເລີດ
ຕັດສະຣູ້ດ້ວຍພຣະອົງເອງ ຊົງຮຸ່ງເຮືອງຢູ່

[໓໐]　ພູມິພາກນີ້ ຕົ້ນຫຍ້າລະດາວັນ ວຽນເປັນທັກຂິນາວັດ
ພູມິພາກນີ້ເປັນຈຸດສູນກາງແຫ່ງແຜ່ນດິນ
ຂໍເດຊະພຣະມະຫາຣາດ ຂ້າພຣະອົງໄດ້ສະດັບມາດັ່ງນີ້

[໓໑]　ພູມິພາກແຫ່ງນີ້ເປັນຈຸດສູນກາງແຫ່ງແຜ່ນດິນ
ເຊິ່ງເປັນທີ່ຮອງຮັບສັບພະສັດ ເປັນແຜ່ນດິນທີ່ມີສາຄອນລ້ອມຮອບ
ຂໍພຣະອົງສະເດັດລົງມານະມັດສະການເທີ້ນ ຂ້ານ້ອຍ

[໑໗໔] ພະຍາຊ້າງເຫຼົ່າໃດເຖິງຈະເປັນຊ້າງແກ້ວແລະເກີດໃນຕະກູນສູງ
ພະຍາຊ້າງເຫຼົ່ານັ້ນກໍເຂົ້າໄປໃກ້ສະຖານທີ່ມີປະມານພຽງນັ້ນບໍ່ໄດ້

[໑໗໓] ພະຍາຊ້າງເຖິງຈະເກີດໃນຕະກູນສູງກໍຈິງ
ຂໍພຣະອົງຊົງໄສພະຍາຊ້າງຕົວທີ່ເຝິກແລ້ວໄປເທີ້ນ
ສະຖານທີ່ມີປະມານພຽງນີ້ ພະຍາຊ້າງກໍບໍ່ສາມາດຈະເຂົ້າໄປໄດ້

[໑໗໔] ພຣະເຈົ້າກາລິງຄະເມື່ອຊົງສະດັບຄຳເວົ້ານັ້ນແລ້ວ
ຊົງພິຈາຣະນາວາຈາຂອງປຸໂຣຫິດຜູ້ພະຍາກອນ
ແລ້ວຊົງໄສພະຍາຊ້າງໄປດ້ວຍພຣະດຳຣິວ່າ
ເຮົາຈັກຮູ້ຕາມຄຳທີ່ພາມນີ້ເວົ້າແມ່ນແທ້ບໍ

[໑໗໕] ສ່ວນພະຍາຊ້າງທີ່ພຣະຣາຊາຊົງໄສໄປ
ໄດ້ເປ່ງສຽງໂກນຈະນາດອັນກຶກກ້ອງ ໄດ້ຖອຍຫຼັງຄຸກເຂົ່າລົງ
ເໝືອນບໍ່ສາມາດຈະນຳພາຣະອັນໜັກໄປໄດ້

[໑໗໖] ພາມປຸໂຣຫິດພາລະຫະວາຊະຊາວກາລິງຄະຮູ້ວ່າ
ພຣະຄະຊາທາຣະສິ້ນຊີບສາແລ້ວຈຶ່ງໄດ້ຮີບຂາບທູນພຣະເຈົ້າກາລິງຄະວ່າ
ຂໍພຣະອົງສະເດັດປະທັບພຣະຄະຊາທາຣະເຊືອກອື່ນເທີ້ນ
ພຣະຄະຊາທາຣະເຊືອກນີ້ສິ້ນຊີບແລ້ວ ຂ້ານ້ອຍ

[໑໗໗] ພຣະເຈົ້າກາລິງຄະເມື່ອໄດ້ສະດັບຄຳນັ້ນແລ້ວ
ຟ້າວປະທັບພຣະຄະຊາທາຣະເຊືອກອື່ນ
ເມື່ອພຣະຣາຊາສະເດັດປະທັບແລ້ວ
ພຣະຄະຊາທາຣະກໍລົ້ມລົງເທິງແຜ່ນດິນໃນບ່ອນນັ້ນເອງ
ເປັນອັນວ່າ ຄຳຂອງປຸໂຣຫິດຜູ້ຖວາຍພະຍາກອນ
ໄດ້ເປັນຈິງຕາມທີ່ຊ້າງຜາກົດແລ້ວ

[໑໗໘] ພຣະເຈົ້າກາລິງຄະໄດ້ຕັດ
ກັບພາມປຸໂຣຫິດກາລິງຄະດັ່ງນີ້ວ່າ
ທ່ານນັ້ນແລເປັນສຳພຸດທະ ສັບພັນຍູຮູ້ເຫັນເຫດທັງປວງ

[໑໗໙] ກາລິງຄະພາມຜູ້ບໍ່ຍອມຮັບຄຳຊົມເຊີຍນັ້ນໄດ້ຂາບທູນແນວນີ້ວ່າ
ຄວາມຈິງ ຂ້າພຣະອົງທັງຫຼາຍເປັນນັກພະຍາກອນ
ສ່ວນພຣະພຸດທະເຈົ້າທັງຫຼາຍເປັນສັບພັນຍູ ຂ້ານ້ອຍ

[໗໐] ກໍພຣະພຸດທະເຈົ້າທັງຫຼາຍຊົງເປັນສັບພັນຍູ
ແລະຊົງຮູ້ທຸກຢ່າງບໍ່ແມ່ນຊົງຮູ້ດ້ວຍສູດແຕ່ປະການໃດ
ສ່ວນຂ້າພຣະອົງທັງຫຼາຍຮູ້ໄດ້ດ້ວຍກຳລັງວິຊາອາຄົມ
ພຣະພຸດທະເຈົ້າທັງຫຼາຍຊົງຮູ້ແຈ້ງທຸກສິ່ງທຸກຢ່າງ

[໗໑] ລຳດັບນັ້ນ ພຣະຣາຊາຊົງນຳລະບຽບດອກໄມ້
ແລະເຄື່ອງລູບໄລ້ໄປບູຊາ ສະຫຼອງຕົ້ນໂພ
ດ້ວຍດົນຕີຕ່າງ ໆ ທີ່ຮັບສັ່ງໃຫ້ບັນເລງແລ້ວສະເດັດກັບ

[໗໘] ພຣະເຈົ້າກາລິງຄະຊົງຮັບສັ່ງໃຫ້ເກັບດອກໄມ້ຫົກໝື່ນເຫຼັ້ມກວຽນ
ບູຊາໂພທິມົນທົນສະຖານອັນປະເສີດທຸກວັນ ດັ່ງນີ້ແລ

**ກາລິງຄະໂພທິຊາດົກທີ ໖ ຈົບ**

## ໗. ອະກິດຕິຊາດົກ (໔໗໐)
## ວ່າດ້ວຍອະກິດຕິດາບົດ

(ພຣະສາດສະດາຊົງສະແດງເລື້ອງນີ້ວ່າ)

[໗໓] ທ້າວສັກກະຜູ້ເປັນໃຫຍ່ແຫ່ງພູດທອດພຣະເນດເຫັນ
ອະກິດຕິດາບົດເຂົ້າຊານຢູ່ຈຶ່ງຕັດຖາມວ່າ
ທ່ານມະຫາພາມ ພຣະຜູ້ເປັນເຈົ້າປາຖະໜາອັນໃດຢູ່ນໍ?
ຈຶ່ງເຂົ້າຊານຢູ່ອົງດຽວໃນເວລາອາກາດອົບເອົ້າແນວນີ້

(ພຣະໂພທິສັດຊາບທູນວ່າ)

[໗໔] ຂໍຖວາຍພຣະພອນທ້າວສັກກະ ການເກີດອີກ ໑
ການທີ່ສະຣີຣະແຕກທຳລາຍ ໑ ການຫຼົງລືມສະຕິຕາຍ ໑ ເປັນທຸກ
ຍ້ອນເຫດນັ້ນ ທ້າວວາສະວະ ອາດຕະມາຈຶ່ງເຂົ້າຊານ

(ທ້າວສັກກະຖວາຍພອນວ່າ)

[໗໕] ພຣະຜູ້ເປັນເຈົ້າກັດສະປະ ເພາະຄຳເວົ້າທີ່ພຣະຜູ້ເປັນເຈົ້າເຈຣະຈານັ້ນ
ມ່ວນ ເໝາະສົມ ເປັນສຸພາສິດ
ເຮົາຂໍຖວາຍພອນແກ່ພຣະຜູ້ເປັນເຈົ້າຕາມທີ່ໃຈຂອງທ່ານປາຖະໜາ

(ພຣະໂພທິສັດເມື່ອຈະຮັບພອນຈຶ່ງຂາບທູນວ່າ)

[໗໘] ຂໍຖວາຍພຣະພອນທ້າວສັກກະ ຜູ້ເປັນໃຫຍ່ແຫ່ງພູດທັງປວງ
ຫາກມະຫາບໍພິດຈະປະທານພອນແກ່ອາດຕະມາ
ນໍຣະຊົນທັງຫຼາຍໄດ້ບຸດ ພັນລະຍາ ຊັບ ເຂົ້າເປືອກ
ແລະສິ່ງຂອງອັນເປັນທີ່ຮັກແລ້ວຍັງບໍ່ອິ່ມ ຍ້ອນຄວາມໂລບອັນໃດ
ຄວາມໂລບອັນນັ້ນຂໍຢ່າໄດ້ມີຢູ່ໃນອາດຕະມາເລີຍ

(ທ້າວສັກກະປະທານພອນໃຫ້ຍິ່ງຂຶ້ນໄປວ່າ)

[໗໗] ພຣະຜູ້ເປັນເຈົ້າກັດສະປະ ເພາະຄໍາເວົ້າທີ່ພຣະຜູ້ເປັນເຈົ້າເຈຣະຈານັ້ນ
ມ່ວນ ເໝາະສົມ ເປັນສຸພາສິດ
ເຮົາຂໍຖວາຍພອນແກ່ພຣະຜູ້ເປັນເຈົ້າຕາມທີ່ໃຈຂອງທ່ານປາຖະໜາ

(ພຣະໂພທິສັດເມື່ອຈະຮັບພອນຈຶ່ງຂາບທູນວ່າ)

[໗໙] ຂໍຖວາຍພຣະພອນທ້າວສັກກະ ຜູ້ເປັນໃຫຍ່ແຫ່ງພູດທັງປວງ
ຫາກມະຫາບໍພິດຈະປະທານພອນແກ່ອາດຕະມາ
ນາ ສວນ ເງິນ ງົວ ມ້າ ແລະຄົນຜູ້ເປັນທາດຍ່ອມເສື່ອມໝົດໄປ
ເພາະໂທສະທີ່ເກີດແລ້ວອັນໃດ
ໂທສະອັນນັ້ນຂໍຢ່າໄດ້ມີຢູ່ໃນອາດຕະມາເລີຍ

(ທ້າວສັກກະຕັດວ່າ)

[໗໙] ພຣະຜູ້ເປັນເຈົ້າກັດສະປະ ຍ້ອນຄໍາເວົ້າທີ່ພຣະຜູ້ເປັນເຈົ້າເຈຣະຈານັ້ນ
ມ່ວນ ເໝາະສົມ ເປັນສຸພາສິດ
ເຮົາຂໍຖວາຍພອນແກ່ພຣະຜູ້ເປັນເຈົ້າຕາມທີ່ໃຈຂອງທ່ານປາຖະໜາ

(ພຣະໂພທິສັດຂາບທູນວ່າ)

[໙໐] ຂໍຖວາຍພຣະພອນທ້າວສັກກະ ຜູ້ເປັນໃຫຍ່ແຫ່ງພູດທັງປວງ
ຫາກມະຫາບໍພິດຈະປະທານພອນແກ່ອາດຕະມາ
ຂໍໃຫ້ອາດຕະມາບໍ່ເພິ່ງພົບເຫັນຄົນພານ ບໍ່ເພິ່ງໄດ້ຍິນ
ບໍ່ເພິ່ງຢູ່ຮ່ວມກັບຄົນພານ ບໍ່ເພິ່ງທໍາການເຈຣະຈາປາໄສນໍາ
ແລະບໍ່ເພິ່ງພໍໃຈການເຈຣະຈາປາໄສກັບຄົນພານນັ້ນເລີຍ

(ທ້າວສັກກະຕັດວ່າ)

[໙໑]　　ພຣະຜູ້ເປັນເຈົ້າກັດສະປະ ຄົນພານໄດ້ເຮັດຫຍັງແກ່ພຣະຜູ້ເປັນເຈົ້າບໍ
ຂໍຈົ່ງບອກເຫດນັ້ນ ເປັນຫຍັງພຣະຜູ້ເປັນເຈົ້າຈຶ່ງບໍ່ຕ້ອງການພົບເຫັນຄົນພານ

(ພຣະໂພທິສັດຂາບທູນວ່າ)

[໙໒]　　ຄົນພານມີປັນຍາຊາມ ຍ່ອມແນະນຳສິ່ງທີ່ບໍ່ຄວນແນະນຳ
ຊັກຊວນໃນສິ່ງທີ່ບໍ່ແມ່ນທຸຣະ
ການແນະນຳຊົ່ວເປັນສິ່ງທີ່ປະເສີດສຳລັບເຂົາ
ເຂົາຖືກວ່າກ່າວໂດຍຊອບກໍຄຽດ ຄົນພານນັ້ນບໍ່ຮູ້ວິໄນ
ການບໍ່ພົບເຫັນເຂົາເລີຍໄດ້ເປັນການດີ

(ທ້າວສັກກະຕັດວ່າ)

[໙໓]　　ພຣະຜູ້ເປັນເຈົ້າກັດສະປະ ເພາະຄຳເວົ້າທີ່ພຣະຜູ້ເປັນເຈົ້າເຈຣະຈານັ້ນ
ມ່ວນ ເໝາະສົມ ເປັນສຸພາສິດ
ຂ້ານ້ອຍຂໍຖວາຍພອນແກ່ພຣະຜູ້ເປັນເຈົ້າຕາມທີ່ໃຈຂອງທ່ານປາຖະໜາ

(ພຣະໂພທິສັດຂາບທູນວ່າ)

[໙໔]　　ຂໍຖວາຍພຣະພອນທ້າວສັກກະ ຜູ້ເປັນໃຫຍ່ແຫ່ງພູດທັງປວງ
ຫາກມະຫາບໍພິດຈະປະທານພອນແກ່ອາດຕະມາ
ຂໍໃຫ້ອາດຕະມາເພິ່ງໄດ້ພົບ ເພິ່ງໄດ້ຍິນ ເພິ່ງໄດ້ຢູ່ຮ່ວມກັບນັກປາດ
ເພິ່ງໄດ້ເຈຣະຈາປາໄສແລະພໍໃຈການເຈຣະຈາປາໄສກັບນັກປາດເທີ້ນ

(ທ້າວສັກກະຕັດວ່າ)

[໙໕]　　ພຣະຜູ້ເປັນເຈົ້າກັດສະປະ ນັກປາດໄດ້ເຮັດຫຍັງແກ່ພຣະຜູ້ເປັນເຈົ້າບໍ
ຂໍຈົ່ງບອກເຫດ ຍ້ອນເຫດໃດ
ພຣະຜູ້ເປັນເຈົ້າຈຶ່ງຕ້ອງການພົບເຫັນນັກປາດ

(ພຣະໂພທິສັດຂາບທູນວ່າ)

[໙໖]　　ນັກປາດຜູ້ມີປັນຍາຍ່ອມແນະນຳສິ່ງທີ່ຄວນແນະນຳ
ບໍ່ຊັກຊວນໃນສິ່ງທີ່ບໍ່ແມ່ນທຸຣະ ການແນະນຳດີເປັນສິ່ງປະເສີດຂອງເຂົາ

ເຂົາຖືກວ່າກ່າວໂດຍຊອບກໍບໍ່ໂກດ
ນັກປາດນັ້ນຮູ້ວິໄນ ການສະມາຄົມກັບທ່ານເປັນການດີ

(ທ້າວສັກກະຕັດວ່າ)

[໙໗] ພຣະຜູ້ເປັນເຈົ້າກັດສະປະ ເພາະຄຳເວົ້າທີ່ພຣະຜູ້ເປັນເຈົ້າເຈຣະຈານັ້ນ
ມ່ວນ ເໝາະສົມ ເປັນສຸພາສິດ
ເຮົາຂໍຖວາຍພອນແກ່ພຣະຜູ້ເປັນເຈົ້າຕາມທີ່ໃຈຂອງທ່ານປາຖະໜາ

(ພຣະໂພທິສັດຂາບທູນວ່າ)

[໙໘] ຂໍຖວາຍພຣະພອນທ້າວສັກກະ ຜູ້ເປັນໃຫຍ່ແຫ່ງພູດທັງປວງ
ຫາກມະຫາບໍພິດຈະປະທານພອນແກ່ອາດຕະມາ
ເມື່ອຣາຕີນັ້ນສິ້ນໄປ ໃນເວລາດວງອາທິດຂຶ້ນ
ຂໍພັກສາອັນເປັນທິບແລະຍາຈົກຜູ້ມີສິນເພິ່ງຜາກົດ
[໙໙] ຂໍຖວາຍພຣະພອນ ເມື່ອອາດຕະມາໃຫ້ຢູ່ ຂໍພັກສາຢ່າເພິ່ງໝົດສິ້ນໄປ
ເມື່ອໃຫ້ແລ້ວ ຂໍອາດຕະມາຢ່າເພິ່ງເດືອດຮ້ອນໃນພາຍຫຼັງ
ໃນຂະນະທີ່ກຳລັງໃຫ້ ກໍເພິ່ງທຳຈິດໃຫ້ເຫຼື້ອມໃສ

(ທ້າວສັກກະຕັດວ່າ)

[໑໐໐] ພຣະຜູ້ເປັນເຈົ້າກັດສະປະ ເພາະຄຳເວົ້າທີ່ພຣະຜູ້ເປັນເຈົ້າເຈຣະຈານັ້ນ
ມ່ວນ ເໝາະສົມ ເປັນສຸພາສິດ
ເຮົາຂໍຖວາຍພອນແກ່ພຣະຜູ້ເປັນເຈົ້າຕາມທີ່ໃຈຂອງທ່ານປາຖະໜາ

(ພຣະໂພທິສັດຂາບທູນວ່າ)

[໑໐໑] ຂໍຖວາຍພຣະພອນທ້າວສັກກະ ຜູ້ເປັນໃຫຍ່ແຫ່ງພູດທັງປວງ
ຫາກມະຫາບໍພິດຈະປະທານພອນແກ່ອາດຕະມາ
ຂໍມະຫາບໍພິດຢ່າສະເດັດມາຫາອາດຕະມາອີກເລີຍ

(ທ້າວສັກກະຕັດວ່າ)

[໑໐໒] ນໍຣະຊົນຊາຍຍິງທັງຫຼາຍຫວັງຢ່າງຍິ່ງທີ່ຈະພົບເຮົາ
ດ້ວຍການພ່ຳເພັງຕະບະຢ່າງໜັກໜ່ວງ
ການເຫັນເຮົາເປັນຕາຢ້ານຫຼາຍແມ່ນບໍ່ສຳລັບທ່ານ

(ພຣະໂພທິສັດຂາບທູນວ່າ)

[໑໐໖] ມະຫາບໍພິດຜູ້ມີວັນນະແຫ່ງເທບ
ບັນດານຄວາມຕ້ອງການທັງປວງໃຫ້ສຳເລັດໄດ້
ອາດຕະມາເມື່ອພົບເຫັນແລ້ວ ຈະເປັນຜູ້ຜະໝາດໃນການພ່ຳເພັງຕະບະ
ສິ່ງນັ້ນຈຶ່ງເປັນໄພແກ່ອາດຕະມາຍ້ອນການພົບເຫັນມະຫາບໍພິດ

**ອະກິດຕິຊາດົກທີ ໗ ຈົບ**

## ໘. ຕັກກາຣິຍະຊາດົກ (໔໘໑)
## ວ່າດ້ວຍຕັກກາຣິຍະມານົບເຕືອນອາຈານ

(ປຸໂຣຫິດຜູ້ເປັນອາຈານສົນທະນາກັບພຣະໂພທິສັດຜູ້ເປັນສິດວ່າ)

[໑໐໔] ທ້າວຕັກກາຣິຍະ ເຮົານັ້ນແລເປັນຄົນໂງ່ ເວົ້າຄຳຊົ່ວ
ເໝືອນກົບທີ່ຢູ່ໃນປ່າຮຽກຫາງູມາກິນຕົວເອງ
ຈະຕ້ອງຕົກໄປສູ່ຂຸມນີ້ ການເວົ້າເກີນຂອບເຂດບໍ່ດີເລີຍ

(ພຣະໂພທິສັດກ່າວວ່າ)

[໑໐໕] ຄົນຜູ້ເວົ້າເກີນຂອບເຂດຍ່ອມປະສົບການຈອງຈຳ
ການຖືກຂ້າ ແລະຄວາມໂສກເສົ້າ ຄ່ຳຄວນ
ທ່ານອາຈານ ທ່ານຄວນຕຳໜິຕົນເອງ
ຕາມເຫດທີ່ຄົນທັງຫຼາຍຈະຝັງທ່ານລົງໃນຂຸມ

(ລູກຊາຍເສດຖີກ່າວວ່າ)

[໑໐໖] ເຮົາໄປຖາມຕຸນຖິລະເຮັດຫຍັງ
ນາງກາລີນີ້ ຄວນເຮັດກັບນ້ອງຊາຍນາງເອງ
ເຮົາຖືກແຍ່ງເສື້ອຜ້າ ແລະກາຍເປັນຊີເປືອຍໄປ
ແມ່ນເລື້ອງນີ້ກໍເໝືອນເລື້ອງຂອງທ່ານອາຈານຫຼາຍ

(ພຣະໂພທິສັດສະແດງເຫດອື່ນອີກວ່າ)

[໑໐໗] ນົກກຸລິງຄະຕົວເອງບໍ່ໄດ້ຕໍ່ສູ້ກັບໃຜເລີຍ
ແຕ່ໄປບິນຢູ່ລະຫວ່າງແກະທີ່ກຳລັງຊົນກັນ

ຈຶ່ງຖືກທົວແກະທັງ ໔ ບິດຍ່ອງທ່າມກາງອາກາດນັ້ນ
ແມ່ນເລື້ອງນີ້ກໍເໝືອນເລື້ອງຂອງທ່ານອາຈານຫຼາຍ

[໑໐໗] ຄົນ ໔ ຄົນເມື່ອຈະຊ່ອຍເຫຼືອຄົນພຽງຄົນດຽວຈຶ່ງພາກັນຈັບຊາຍຜ້າ
ພວກເຂົາທັງໝົດ ໔ ຄົນຈຶ່ງພາກັນທົວແຕກນອນຕາຍໄປ
ແມ່ນເລື້ອງນີ້ກໍເໝືອນເລື້ອງຂອງທ່ານອາຈານຫຼາຍ

[໑໐໘] ອຸປະມາເໝືອນແມ່ແບ້ທີ່ເຂົາຜູກມັດໄວ້ທີ່ຟຸ່ມກໍໄຜ່
ຄຶກຄະນອງ ດີດຂາໄປກະທົບມີດດາບ
ຈຶ່ງຖືກເຂົາໃຊ້ມີດດາບເຫຼັ້ມນັ້ນປາດຄໍຂອງມັນ
ແມ່ນເລື້ອງນີ້ກໍເໝືອນເລື້ອງຂອງທ່ານອາຈານຫຼາຍ

(ພຣະຣາຊາຊົງໂກດຕໍ່ນາຍພານ ຈຶ່ງຕັດວ່າ)

[໑໑໐] ກິນນະຣີເຫຼົ່ານີ້ບໍ່ແມ່ນເທວະດາ ບໍ່ແມ່ນຄົນທັນເທບພະບຸດ
ເປັນສັດພວກເນື້ອ ຕົກຢູ່ໃນອຳນາດຂອງເຮົາ
ພວກເຈົ້າຈົ່ງປີ້ງມັນຕົວໜຶ່ງໃນເວລາອາຫານແລງ
ອີກຕົວໜຶ່ງຈົ່ງຈີ່ມັນໃນເວລາອາຫານເຊົ້າຕໍ່ໄປ

(ກິນນະຣີຮູ້ວ່າພຣະຣາຊາຊົງໂກດ ຈຶ່ງຂາບທູນວ່າ)

[໑໑໑] ຄຳທຸບພາສິດນັບແສນຄຳກໍບໍ່ເຖິງແມ່ນສ່ວນໜຶ່ງແຫ່ງຄຳສຸພາສິດ
ກິນນະຣີຮັ່ງກຽດຄຳທຸບພາສິດຈຶ່ງເສົ້າໝອງ
ຍ້ອນເຫດນັ້ນ ພວກກິນນະຣະຈຶ່ງນິ່ງເສີຍ ບໍ່ແມ່ນຍ້ອນຄວາມໂງ່ຈ້າ

(ພຣະຣາຊາຊົງຍິນດີແລ້ວຕັດວ່າ)

[໑໑໔] ກິນນະຣີຕົວນີ້ເວົ້າກັບເຮົາແລ້ວ ພວກເຈົ້າຈົ່ງປ່ອຍມັນໄປ
ແລະຈົ່ງນຳມັນໄປສູ່ພູຫິມະພານ
ສ່ວນຕົວນີ້ ເຈົ້າຈົ່ງໃຫ້ເອົາໄປໄວ້ຢູ່ຫ້ອງຄົວໃຫຍ່
ແລະປີ້ງມັນໃນເວລາອາຫານເຊົ້າມື້ມື້ອື່ນນີ້

(ກິນນະຣະໄດ້ຟັງພຣະດຳຣັດນັ້ນແລ້ວຈຶ່ງຂາບທູນວ່າ)

[໑໑໕] ປະສຸສັດທັງຫຼາຍມີເມກຝົນເປັນບ່ອນເພິ່ງ
ປະຊາຊົນນີ້ມີປະສຸສັດເປັນບ່ອນເພິ່ງ

ຂ້າແດ່ພຣະມະຫາຣາດ ພຣະອົງເປັນບ່ອນເພິ່ງຂອງຂ້າພຣະອົງ
ຂ້າພຣະອົງເປັນບ່ອນເພິ່ງຂອງພັນລະຍາຂອງຂ້າພຣະອົງ
ລະຫວ່າງຂ້າພຣະອົງທັງ ໔ ຕົວໜຶ່ງຮູ້ວ່າອີກຕົວໜຶ່ງຕາຍແລ້ວ
ຕົນພົ້ນຄວາມຕາຍແລ້ວຈຶ່ງຈະບິນໄປສູ່ພູ

[໑໑໔] ຂໍເດຊະພຣະອົງຜູ້ຈອມຊົນ
ຄົນຈະເພິ່ງຫຼີກເວັ້ນຈາກການນິນທາໄດ້ໂດຍງ່າຍກໍຫາບໍ່ໄດ້
ຄົນທີ່ຄວນຄົບຫາກໍມີສັນທະຕ່າງ ໆ ກັນ
ຄົນໜຶ່ງໄດ້ຮັບການຍົກຍ້ອງດ້ວຍຄຸນນະທໍາຂໍ້ໃດ
ຄຸນນະທໍາຂໍ້ນັ້ນແລ ຄົນອື່ນກັບໄດ້ຮັບການນິນທາ

[໑໑໕] ສັດໂລກທັງຫຼາຍມີຈິດຊາມແດ່ ປະນິດແດ່
ສັດໂລກທັງປວງຊື່ວ່າມີຄວາມຄິດກໍເພາະຈິດຂອງຕົນ
ສັດທຸກຕົວຕົນໃນໂລກນີ້ລ້ວນມີຈິດເປັນຂອງຕົນເອງ
ຈຶ່ງບໍ່ຄວນຍອມຢູ່ໃນອໍານາດແຫ່ງຈິດຂອງຜູ້ໃດ

(ພຣະຣາຊາຊົງໂສມະນັດແລ້ວຈຶ່ງຕັດວ່າ)

[໑໑໖] ກິນນະຣີພ້ອມທັງພັນລະຍາໄດ້ນິ່ງຢູ່
ບັດນີ້ ກິນນະຣີຕົນໃດຢ້ານໄພຈຶ່ງເວົ້າ
ກິນນະຣີຕົນນັ້ນພົ້ນໄພແລ້ວ ມີຄວາມສຸກ ບໍ່ມີໂຣກ
ນັບວ່າ ການເວົ້າມີປະໂຫຍດແກ່ສັດທັງຫຼາຍໂດຍແທ້

**ຕັກກາຣີຍະຊາດົກທີ່ ໗ ຈົບ**

## ໘. ຣຸຣຸມິຄະຣາຊະຊາດົກ (໔໗໔)
## ວ່າດ້ວຍນໍ້າໃຈຂອງພະຍາເນື້ອຣຸຣຸ

(ພຣະຣາຊາຕັດວ່າ)

[໑໑໗] ເຮົາຈະໃຫ້ບ້ານສ່ວຍແລະເຫຼົ່ານາຣີທີ່ປະດັບຕົບແຕ່ງແລ້ວແກ່ຄົນ
ຜູ້ບອກກ່າວເຖິງພະຍາເນື້ອຕົວປະເສີດກວ່າເນື້ອທັງຫຼາຍແກ່ເຮົາ

(ບຸດເສດຖີຂາບທູນວ່າ)

[໑໑໙] ຂໍພຣະອົງປະທານບ້ານສ່ວຍແລະເຫຼົ່ານາຣີ
ທີ່ປະດັບຕົບແຕ່ງແລ້ວແກ່ຂ້າພຣະອົງ
ຂ້າພຣະອົງຈັກຂາບທູນເຖິງພະຍາເນື້ອ
ຕົວປະເສີດກວ່າເນື້ອທັງຫຼາຍຕໍ່ພຣະອົງ

(ເມື່ອຈະບອກທີ່ຢູ່ຂອງພະຍາເນື້ອ ຈຶ່ງຂາບທູນວ່າ)

[໑໑໗] ໃນເຂດປ່າແຫ່ງນັ້ນ ຕົ້ນໝາກມ່ວງແລະຕົ້ນສາລະແຕກດອກບານສະພັ່ງ
ພູມິພາກປົກຄຸມໄປດ້ວຍຕິນຊາດມີສີແດງເໝືອນປີກແມງເຕົ່າຄໍາ
ພະຍາເນື້ອຕົວນັ້ນຢູ່ໃນເຂດປ່າແຫ່ງນີ້

(ພຣະສາດສະດາຊົງປະກາດເລື້ອງນັ້ນວ່າ)

[໑໔໐] ພຣະຣາຊາຊົງໂກ່ງທະນູສອດໃສ່ລູກສອນ ສະເດັດເຂົ້າໄປໃກ້
ສ່ວນພະຍາເນື້ອເຫັນພຣະຣາຊາແລ້ວຈຶ່ງຮ້ອງຂາບທູນແຕ່ໄກວ່າ

[໑໔໑] ຊົງຢຸດກ່ອນ ພຣະມະຫາຣາດຜູ້ຈອມທັບ
ຢ່າຟ້າວຊົງຍິງຂ້າພຣະອົງ
ໃຜນໍາຂາບທູນເລື້ອງນີ້ແກ່ພຣະອົງວ່າ
ພະຍາເນື້ອຕົວນັ້ນຢູ່ໃນເຂດປ່າແຫ່ງນີ້

(ພຣະຣາຊາຕັດວ່າ)

[໑໔໒] ເຈົ້າຄົນທີ່ປະພຶດຊົ່ວຊາມຢືນຢູ່ຫ່າງ ໆ
ນັ້ນເພື່ອນ ກໍເຂົານັ້ນແລໄດ້ບອກເລື້ອງນີ້ແກ່ເຮົາວ່າ
ເນື້ອຕົວນັ້ນຢູ່ໃນເຂດປ່າແຫ່ງນີ້

(ພຣະໂພທິສັດຂາບທູນວ່າ)

[໑໔໓] ໄດ້ຍິນວ່າ ຄົນບາງພວກໃນໂລກນີ້
ໄດ້ກ່າວຄວາມຈິງໄວ້ແນວນີ້ວ່າ ໄມ້ລອຍນໍ້າຍັງດີກວ່າ
ສ່ວນຄົນບາງຄົນທີ່ປະທຸດສະຮ້າຍມິດບໍ່ດີເລີຍ

(ພຣະຣາຊາຊົງສະດັບດັ່ງນັ້ນ ຈຶ່ງຕັດວ່າ)

[໑໔໔] ນີ້ພະຍາເນື້ອຣຸຣຸ ເຈົ້າຕິຕຽນໝູ່ເນື້ອ

ຫຼືໝູ່ນົກ ກໍຫຼືຕິຽນໝູ່ມະນຸດ
ເພາະໄພອັນໃຫຍ່ຫຼວງຈະມາຕ້ອງເຮົາ
ຍ້ອນໄດ້ຟັງເຈົ້າເວົ້າພາສາມະນຸດ

(ພຣະໂພທິສັດຂາບທູນວ່າ)

[໑໘໕] ຂໍເດຊະພຣະມະຫາຣາດ ຂ້າພຣະອົງໄດ້ຊ່ອຍຜູ້ໃດ
ເຊິ່ງຖືກນ້ຳພັດມາໃນແມ່ນ້ຳທີ່ມີນ້ຳຫຼາຍ ມີແລວນ້ຳໄຫຼແຮງຂຶ້ນມາ
ໄພມາເຖິງຂ້າພຣະອົງຍ້ອນຜູ້ນັ້ນເປັນເຫດ
ການສະມາຄົມກັບຄົນຊົ່ວເປັນທຸກ

(ພຣະຣາຊາຊົງໂກດບຸດເສດຖີ ຈຶ່ງຕັດວ່າ)

[໑໘໖] ເຮົານັ້ນຈະປ່ອຍລູກສອນ ໔ ປີກດອກນີ້
ແຫວກອາກາດໄປເຈາະຮ່າງສຽບກົງຫົວໃຈ
ເຮົາຈະຂ້າມັນຜູ້ປະທຸດສະຮ້າຍມິດ ເຮັດກິດທີ່ບໍ່ຄວນເຮັດ
ເຊິ່ງບໍ່ຮູ້ຈັກຄົນຜູ້ເຮັດທ່ານໄວ້ເຊັ່ນນັ້ນ

(ລຳດັບນັ້ນ ພຣະໂພທິສັດຂາບທູນວ່າ)

[໑໘໗] ຂໍເດຊະພຣະອົງຜູ້ຈອມຊົນ ຜູ້ຊົງພຣະປັຊາ
ການຂ້າຄົນຊົ່ວນັ້ນ ສັດຕະບຸຣຸດທັງຫຼາຍບໍ່ສັນເສີນ
ຂໍຄົນຜູ້ມີທຳຊົ່ວຊ້າຈົ່ງກັບໄປບ້ານໄດ້ຕາມຄວາມປາຖະໜາ
ແລະຂໍພຣະອົງຊົງພຣະຣາດຊະທານ
ສິ່ງທີ່ພຣະອົງຕັດພຣະຣາດຊະທານໄວ້ແກ່ເຂົາເທີ້ນ
ແລະຂ້າພຣະອົງຈະທຳສິ່ງທີ່ພຣະອົງຊົງປາຖະໜາ

(ພຣະຣາຊາຊົງຊົມເຊີຍພຣະໂພທິສັດແລ້ວຕັດວ່າ)

[໑໘໘] ພະຍາເນື້ອຣຸຣຸ ເຈົ້າບໍ່ປະທຸດສະຮ້າຍຕໍ່ຄົນຜູ້ປະທຸດສະຮ້າຍ
ແຖມຍັງປ່ອຍໃຫ້ຄົນຊົ່ວຊ້າກັບໄປບ້ານໄດ້ຕາມສະບາຍ
ນັບວ່າເປັນຜູ້ໜຶ່ງໃນບັນດາສັດຕະບຸຣຸດທັງຫຼາຍແນ່ນອນ
ເຮົາຈະໃຫ້ສິ່ງທີ່ໄດ້ເວົ້າວ່າຈະໃຫ້ແກ່ເຂົາ
ແລະຈະໃຫ້ເຈົ້າທ່ຽວໄປຕາມຄວາມພໍໃຈດ້ວຍ

(ລຳດັບນັ້ນ ພຣະໂພທິສັດເມື່ອຈະລອງຢັ່ງພຣະທະໄທພຣະຣາຊາ ຈຶ່ງໄດ້ຂາບທູນວ່າ)

[໑໘໗] ຂໍເດຊະພຣະຣາຊາ ສຽງເຫຼົ່າໝາຈອກເຫົ່າຫອນກໍດີ
ສຽງເຫຼົ່ານົກຮ້ອງຂັນກໍດີ ຮູ້ໄດ້ງ່າຍ
ສ່ວນຄຳເວົ້າທີ່ພວກມະນຸດເປ່ງອອກມາ ຮູ້ໄດ້ຍາກກວ່ານັ້ນ

[໑໘໐] ຄົນບາງຄົນເບື້ອງຕົ້ນເປັນຄົນໃຈດີ ຍ່ອມນັບຖືກັນວ່າ
ເປັນຍາດ ເປັນມິດ ຫຼືເປັນເພື່ອນແນວນີ້ແດ່
ພາຍຫຼັງກາຍເປັນສັດຕູໄປກໍມີ

(ພຣະສາດສະດາຊົງປະກາດຄວາມຂໍ້ນັ້ນວ່າ)

[໑໘໑] ພວກຊາວຊົນນະບົດແລະຊາວນິຄົມມາປະຊຸມພ້ອມກັນ
ຮ້ອງທຸກວ່າມີພວກເນື້ອພາກັນມາກິນເຂົ້າກ້າ
ຂໍພຣະອົງຜູ້ສົມມຸດຕິເທບຈົ່ງຊົງຫ້າມໝູ່ເນື້ອນັ້ນ

(ພຣະຣາຊາຊົງສະດັບດັ່ງນັ້ນແລ້ວ ຈຶ່ງຕັດວ່າ)

[໑໘໒] ຊົນນະບົດຈົ່ງຢ່າມີແລະແມ່ນແວ່ນແຄວ້ນຈົ່ງພິນາດໄປກໍຕາມ
ສ່ວນເຮົາໃຫ້ອະໄພທານແລ້ວ
ຈະບໍ່ປະທຸດສະຮ້າຍພະຍາເນື້ອຣຸຣຸຢ່າງເດັດຂາດ

[໑໘໓] ຊົນນະບົດຂອງເຮົາຈົ່ງຢ່າມີແລະແວ່ນແຄວ້ນຂອງເຮົາຈົ່ງພິນາດໄປ
ສ່ວນເຮົາໃຫ້ພອນແກ່ພະຍາເນື້ອແລ້ວຈະບໍ່ເວົ້າມຸສາເດັດຂາດ

**ຣຸຣຸມິຄະຣາຊະຊາດົກທີ ໗ ຈົບ**

## ໑໐. ສະຣະພະມິຄະຊາດົກ (໔໘໓)
## ວ່າດ້ວຍລະມັ່ງເຮັດຄຸນແກ່ພຣະຣາຊາ

(ພຣະເຈົ້າພິມມະທັດມີພຣະທະໄທປ່ຽມດ້ວຍປິຕິ ຊົງເປ່ງອຸທານວ່າ)

[໑໘໔] ເປັນຄົນຕ້ອງຫວັງສະເໝີໄປ
ຄົນສະຫຼາດບໍ່ຄວນທໍ້ແທ້
ເຮົາເຫັນຕົວເອງເປັນຕົວຢ່າງ
ປາຖະໜາແນວໃດກໍໄດ້ແນວນັ້ນ

[໑໓໕]	ເປັນຄົນຕ້ອງຫວັງສະເໝີໄປ ຄົນສະຫຼາດບໍ່ຄວນທໍ້ແທ້
ເຮົາເຫັນຕົວເອງເປັນຕົວຢ່າງ
ຖືກເຂົາຊ່ອຍໃຫ້ຂຶ້ນຈາກນໍ້າມາເທິງບົກໄດ້

[໑໓໖]	ເປັນຄົນຕ້ອງພະຍາຍາມຢູ່ສະເໝີ ຄົນສະຫຼາດບໍ່ຄວນທໍ້ແທ້
ເຮົາເຫັນຕົວເອງເປັນຕົວຢ່າງ
ປາຖະໜາແນວໃດກໍໄດ້ແນວນັ້ນ

[໑໓໗]	ເປັນຄົນຕ້ອງພະຍາຍາມຢູ່ສະເໝີ ຄົນສະຫຼາດບໍ່ຄວນທໍ້ແທ້
ເຮົາເຫັນຕົວເອງເປັນຕົວຢ່າງ
ຖືກເຂົາຊ່ອຍໃຫ້ຂຶ້ນຈາກນໍ້າມາເທິງບົກໄດ້

[໑໓໘]	ຄົນມີປັນຍາແມ່ນຈະຕົກຢູ່ໃນຄວາມທຸກ
ກໍບໍ່ຄວນສິ້ນຄວາມຫວັງ ເພື່ອຈະບັນລຸເຖິງຄວາມສຸກ
ເພາະວ່າສໍາຜັດ°ມີຢູ່ຫຼວງຫຼາຍ ທັງທີ່ບໍ່ມີປະໂຫຍດແລະມີປະໂຫຍດ
ເຖິງຈະບໍ່ນຶກຄິດກໍຕ້ອງເຖິງຄວາມຕາຍ

[໑໓໙]	ສິ່ງທີ່ບໍ່ໄດ້ຄິດແລ້ວເປັນໄປໄດ້ກໍມີ
ສິ່ງທີ່ຄິດແລ້ວພິນາດໄປກໍມີ
ບໍ່ວ່າຈະເປັນຍິງຫຼືຊາຍ
ໂພຄະທັງຫຼາຍສໍາເລັດໄດ້ຍ້ອນຄວາມຄິດບໍ່ມີເລີຍ

(ພາມປຸໂຣຫິດຖວາຍພຣະພອນໄຊແລ້ວ ໄດ້ຂາບທູນວ່າ)

[໑໔໐]	ລະມັ່ງຕົວໃດ ພຣະອົງຕິດຕາມໄປຈົນເຖິງຮ່ອມພູ ໃນຕອນທໍາອິດ
ຍ້ອນອາໄສຄວາມບາກບັ່ນຂອງລະມັ່ງຕົວນັ້ນເຊິ່ງມີຈິດບໍ່ທໍ້ຖອຍ
ພຣະອົງຈຶ່ງຍັງຊົງພະຊົນຢູ່ໄດ້

[໑໔໑]	ລະມັ່ງຕົວໃດ ພະຍາຍາມໃຊ້ກ້ອນຫີນຖົມ
ຊ່ອຍພຣະອົງຂຶ້ນມາຈາກເຫວທີ່ຂຶ້ນໄດ້ແສນຍາກ
ແລະປົດເປື້ອງພຣະອົງຜູ້ຊົງຣະທົມທຸກຈາກປາກພະຍາມັດຈຸຣາດ
ພຣະອົງຄົງຈະຊົງຮັບສັ່ງເຖິງລະມັ່ງຕົວມີຈິດບໍ່ທໍ້ຖອຍຕົວນັ້ນ

(ພຣະຣາຊາຕັດວ່າ)

[໑໔໘] ເວລານັ້ນ ທ່ານໄດ້ຢູ່ ໃນບ່ອນນັ້ນຄືກັນບໍ
ຫຼືວ່າໃຜບອກເລື້ອງນັ້ນແກ່ທ່ານ
ທ່ານເຫັນທຸກຢ່າງບໍ ຈຶ່ງເປີດເຜີຍເລື້ອງນັ້ນໄດ້
ຍານຂອງທ່ານມີກຳລັງຫຼາຍແມ່ນແທ້ບໍພາມ

(ພາມປຸໂຣຫິດເມື່ອຈະຊີ້ແຈ່ງ ຈຶ່ງຂາບທູນວ່າ)

[໑໔໙] ເວລານັ້ນ ຂ້າພຣະອົງໄດ້ຢູ່ບ່ອນນັ້ນດ້ວຍກໍຫາບໍ່ໄດ້
ແລະແມ່ນໃຜຈະບອກເລື້ອງນັ້ນ ໆ ແກ່ຂ້າພຣະອົງກໍຫາບໍ່ໄດ້
ຂໍເດຊະພຣະອົງຜູ້ຈອມຊົນ ປາດທັງຫຼາຍ
ປະມວນເນື້ອຄວາມແຫ່ງບົດຄາຖາສຸພາສິດນັ້ນມາ

(ຕໍ່ມາທ້າວສັກກະຊົງສົງໃນສະຣີຣະຂອງພາມປຸໂຣຫິດແລ້ວໄດ້ຕັດກັບພຣະຣາຊາວ່າ)

[໑໘໔] ພຣະອົງຊົງສອດລູກສອນມີປີກ
ເຊິ່ງຈະຂ້າໄດ້ດ້ວຍຄວາມພຽນຂອງຜູ້ອື່ນໄວ້ທີ່ແລ່ງແລ້ວ
ເປັນຫຍັງຍັງຊົງລັງເລຢູ່ນໍ
ຂໍເດຊະພຣະອົງຜູ້ຊົງພຣະປັນຍາອັນປະເສີດ
ຂໍລູກສອນທີ່ແລ່ນອອກຈາກແລ່ງໄປຈົ່ງຂ້າລະມັ່ງໂດຍໄວເທີ້ນ
ເພາະວ່າເນື້ອລະມັ່ງນັ້ນເປັນພັກສາຂອງພຣະຣາຊາ

(ລຳດັບນັ້ນ ພຣະຣາຊາຕັດວ່າ)

[໑໘໕] ຂໍ້ນັ້ນ ເຖິງເຮົາຈະຮູ້ຢ່າງແຈ່ມແຈ້ງວ່າ
ເນື້ອເປັນພຣະກະຍາຫານຂອງກະສັດກໍຈິງ
ພາມ ແຕ່ເຮົາເມື່ອຈະອ່ອນນ້ອມບູຊາທ່ານ
ທີ່ລະມັ່ງຕົວນີ້ໄດ້ເຮັດໄວ້ແກ່ເຮົາໃນການກ່ອນ
ຍ້ອນເຫດນັ້ນ ຈຶ່ງບໍ່ຂ້າເນື້ອລະມັ່ງ

(ທ້າວສັກກະຕັດວ່າ)

[໑໘໖] ພຣະມະຫາຣາດຜູ້ເປັນໃຫຍ່ໃນທິດ ນັ້ນບໍ່ແມ່ນເນື້ອ
ນັ້ນຄືທ້າວສັກກະຜູ້ຍິ່ງໃຫຍ່ກວ່າອະສູນ
ພຣະອົງຜູ້ຈອມມະນຸດ
ຂໍພຣະອົງຊົງປະຫານທ້າວສັກກະນັ້ນ
ແລ້ວເປັນຈອມເທບສາເອງ

[໑໔໗] ຂໍເດຊະພຣະມະຫາຣາດ ຜູ້ປະເສີດກວ່າຄົນຜູ້ກ້າຫານ
ຖ້າພຣະອົງຍັງຊົງລັງເລທີ່ຈະຂ້າເນື້ອລະມັ່ງຜູ້ສະຫາຍຢູ່
ພຣະອົງພ້ອມທັງພຣະໂອຣົດ ພຣະທິດາ ແລະພຣະມະເຫສີ
ຈະຕ້ອງຕົກເວດຕະຣະນີນະຣົກຂອງພະຍາຍົມ

(ພຣະຣາຊາຕັດວ່າ)

[໑໔໘] ເຮົາແລະຊາວຊົນນະບົດກໍດີ
ລູກເມຍແລະໝູ່ສະຫາຍກໍດີ
ຈະຕ້ອງຕົກເວດຕະຣະນີນະຣົກຂອງພະຍາຍົມກໍຕາມທີ
ເຮົາບໍ່ຄວນຈະຂ້າຜູ້ທີ່ໃຫ້ຊີວິດແກ່ເຮົາເລີຍ

[໑໔໙] ເນື້ອຕົວນີ້ເຮັດຄຸນແກ່ເຮົາຜູ້ກຳລັງຕົກຍາກຢູ່ຄົນດຽວ
ໃນປ່າປ່ຽວອັນແສນທາຣຸນ
ເຮົາເມື່ອຣະນຶກເຖິງບຸບພະກາຣີທີ່ເນື້ອຕົວນີ້ໄດ້ກະທຳໄວ້ເຊັ່ນນັ້ນ
ທັງທີ່ຮູ້ຢູ່ຈະເພິ່ງຂ້າລົງໄດ້ແນວໃດ ທ່ານມະຫາພາມ

(ລຳດັບນັ້ນ ທ້າວສັກກະຊົງປະກາດຄຸນຂອງພຣະຣາຊາວ່າ)

[໑໕໐] ພຣະອົງຊົງໂຜດປານຜູ້ເປັນມິດ
ຂໍຊົງມີພະຊົນຊີບຍືນຍາວເທີ້ນ
ຂໍຊົງດຳຣົງຢູ່ໃນຄຸນນະທຳປົກຄອງຣັດສີມານີ້ເທີ້ນ
ພຣະອົງຜູ້ມີໝູ່ນາຣີບຳເລີຢູ່
ຈົ່ງບັນເທີງພຣະຫະໄທໃນແວ່ນແຄວ້ນ
ດັ່ງເຊັ່ນທ້າວວາສະວະບັນເທີງຢູ່ໃນສະຫວັນຊັ້ນດາວວະດຶງ

[໑໕໑] ຂໍພຣະອົງຢ່າຊົງພິໂຣດ
ມີພຣະຫະໄທຜ່ອງໃສຢູ່ເປັນນິດ
ຊົງຕ້ອນຮັບແຂກຜູ້ມາຢາມທັງປວງ
ຈົ່ງພໍາເພັງທານແດ່ ສະເຫວີຍເອງແດ່ຕາມອານຸພາບ
ຈົ່ງຢ່າຊົງຖືກຊາວໂລກນິນທາ ສະເດັດສູ່ແດນສະຫວັນເທີ້ນ

**ສະຣະພະມິຄະຊາດົກທີ ໑໐ ຈົບ**

## ລວມຊາດົກທີ່ມີໃນນິບາດນີ້ ຄື



**ເຕຣະສະກະນິບາດ ຈົບ**

# ໑໔. ປະກິນນະກະນິບາດ

## ໑. ສາລິເກທາຣະຊາດົກ (໔໗໔)
## ວ່າດ້ວຍ ນົກແຂກເຕົ້າລ້ຽງພໍ່ແມ່

(ຄົນເຝົ້ານາຖືກໂກສິຍະພາມຖາມແລ້ວ ຈຶ່ງໄດ້ກ່າວວ່າ)

[໑] ທ່ານໂກສິຍະ ນາເຂົ້າສາລີບໍລິບູນດີ
ແຕ່ພວກນົກແຂກເຕົ້າພາກັນມາຈິກກິນ
ຂ້າພະເຈົ້າຂໍບອກຄືນນາແຫ່ງນີ້ທ່ານພາມ
ຍ້ອນບໍ່ສາມາດຈະຫ້າມພວກມັນໄດ້

[໔] ແຕ່ບັນດານົກແຂກເຕົ້າເຫຼົ່ານັ້ນ
ມີນົກຕົວໜຶ່ງສວຍງາມກວ່ານົກເຫຼົ່ານັ້ນທັງໝົດ
ກິນເຂົ້າສາລີຕາມຄວາມພໍໃຈແລ້ວຍັງຄາບບິນໄປອີກ

(ພາມໄດ້ກ່າວກັບຄົນເຝົ້ານາວ່າ)

[໓] ເຈົ້າຈົ່ງວາງບ້ວງດັກທາງສັດໂດຍວິທີທີ່ນົກນັ້ນຈະຕິດບ້ວງ
ຈັບເປັນແລ້ວນຳມາໃຫ້ເຮົາ

(ພະຍານົກແຂກເຕົ້າລຳພັນຢູ່ວ່າ)

[໔] ນົກທັງຫຼາຍເຫຼົ່ານັ້ນກິນ ດື່ມແລ້ວກໍບິນໄປ
ສ່ວນເຮົາຕົວດຽວຕິດບ້ວງຢູ່ ເຮົາໄດ້ທຳຄວາມຊົ່ວອັນໃດໄວ້ນໍ

(ພາມກ່າວກັບພະຍານົກແຂກເຕົ້ານັ້ນວ່າ)

[໘] ນົກຕົວອື່ນກິນສະເພາະອີ່ມທ້ອງເທົ່ານັ້ນ ແຕ່ເຈົ້າກິນບໍ່ຮູ້ຈັກເຊົາ
ເຈົ້າກິນເຂົ້າສາລີຕາມຄວາມພໍໃຈແລ້ວຍັງຄາບບິນໄປອີກ

[໖] ສາງທີ່ປ່າໄມ້ງິ້ວນັ້ນເຈົ້າບັນຈຸໄວ້ຈົນເຕັມບໍ
ຫຼືເຈົ້າມີເວນກັບເຮົາ ເຮົາຖາມແລ້ວ ຈົ່ງບອກເທີ້ນ
ເພື່ອນ ເຈົ້າເກັບເຂົ້າສາລີໄວ້ບ່ອນໃດ

(ພະຍານົກແຂກເຕົ້າກ່າວວ່າ)

[໗] ຂ້າພະເຈົ້າບໍ່ໄດ້ມີເວນກັບທ່ານ ສາງຂອງຂ້າພະເຈົ້າກໍບໍ່ມີ
ຂ້າພະເຈົ້າໄປເຖິງປາຍໄມ້ງິ້ວກໍຊຳຣະໜີ້ ແລະໃຫ້ກູ້ຢືມໜີ້
ທັງຍັງຝັງແມ່ນຂຸມຊັບໄວ້ທີ່ປາຍໄມ້ງິ້ວນັ້ນນຳ
ຂໍທ່ານຈົ່ງຮູ້ແນວນີ້ເທີ້ນ ທ່ານໂກສິຍະ

(ພາມຖາມພະຍານົກແຂກເຕົ້າວ່າ)

[໘] ການໃຫ້ກູ້ຢືມໜີ້ແລະການຊຳຣະໜີ້ຂອງເຈົ້າເປັນແນວໃດ
ເຈົ້າຈົ່ງບອກເຖິງການຝັງຂຸມຊັບມາໃຫ້ເຮົາຮູ້
ເມື່ອເຈົ້າບອກມາ ເຈົ້າກໍຈະພົ້ນຈາກບ້ວງ

(ພະຍານົກແຂກເຕົ້າເມື່ອຕອບວ່າ)

[໙] ທ່ານໂກສິຍະ ຂ້າພະເຈົ້າມີລູກອ່ອນຕົວນ້ອຍ ໆ ຂົນປີກຍັງບໍ່ປົ່ງ
ລູກນົກນ້ອຍ ໆ ເຫຼົ່ານັ້ນ ຂ້າພະເຈົ້າໄດ້ລ້ຽງແລ້ວ ຈັກລ້ຽງຂ້າພະເຈົ້າ
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງໃຫ້ພວກເຂົາກູ້ຢືມໜີ້

[໑໐] ພໍ່ແມ່ຂອງຂ້າພະເຈົ້າແກ່ເຖົ້າ ຜ່ານໄວໜຸ່ມສາວໄປແລ້ວ
ຂ້າພະເຈົ້າຄາບຮວງເຂົ້າສາລີໄປເພື່ອທ່ານທັງ ໔ ນັ້ນ
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງຊຳຣະໜີ້ທີ່ທ່ານໄດ້ໃຫ້ກູ້ຢືມໄວ້ໃນການກ່ອນ

[໑໑] ທີ່ປ່າໄມ້ງິ້ວນັ້ນ ຍັງມີນົກອື່ນ ໆ ອີກ
ທີ່ທຸບພົນລະພາບ ມີຂົນປີກໝົດສິ້ນແລ້ວ
ຂ້າພະເຈົ້າຕ້ອງການບຸນ ຈຶ່ງໃຫ້ຮວງເຂົ້າສາລີແກ່ນົກເຫຼົ່ານັ້ນ
ບັນດິດທັງຫຼາຍກ່າວການທຳບຸນນັ້ນວ່າ ເປັນຂຸມຊັບ

[໑໔] ການໃຫ້ກູ້ຢືມໜີ້ແລະການຊຳຣະໜີ້ຂອງຂ້າພະເຈົ້າເປັນແນວນີ້
ຂ້າພະເຈົ້າບອກການຝັງຂຸມຊັບແກ່ທ່ານ
ຂໍທ່ານຈົ່ງຮູ້ແນວນີ້ເທີ້ນ ທ່ານໂກສິຍະ

(ພາມຟັງແລ້ວມີຈິດເຫຼື້ອມໃສ ຈຶ່ງໄດ້ກ່າວວ່າ)

[໑໕] ປັກສານີ້ດີນໍ ເປັນນົກແຕ່ມີທຳຢ່າງປະເສີດ
ໃນພວກມະນຸດບາງເຫຼົ່າບໍ່ມີທຳນີ້

[໑໔] ເຈົ້າພ້ອມກັບພວກຍາດທັງໝົດ
ຈົ່ງກິນເຂົ້າສາລີຕາມຄວາມພໍໃຈເທີ້ນ
ເຈົ້ານົກແຂກເຕົ້າ ເຮົາຄົງໄດ້ພົບກັນອີກ ເຮົາຍິນດີທີ່ຈະພົບເຈົ້າ

(ພະຍານົກແຂກເຕົ້າໃຫ້ໂອວາດວ່າ)

[໑໕] ຂ້າພະເຈົ້າໄດ້ກິນແລະດື່ມໃນບ່ອນຢູ່ຂອງທ່ານ
ແຕ່ໃນເພື່ອນບ້ານຂອງທ່ານບໍ່ໜ້າຍິນດີຫຼາຍ
ທ່ານໂກສິຍະ ຂໍທ່ານຈົ່ງໃຫ້ອະໄພຍະທານໃນເຫຼົ່າສັດຜູ້ວາງອາດຍາແລ້ວ
ແລະຈົ່ງລ້ຽງດູບິດາມານດາຜູ້ແກ່ເຖົ້າເທີ້ນ

(ພາມມີໃຈຍິນດີເປ່ງອຸທານວ່າ)

[໑໖] ວັນນີ້ ໂຊກໄດ້ເກີດຂຶ້ນແກ່ເຮົາແລ້ວ
ທີ່ເຫັນນົກຕົວປະເສີດກວ່ານົກທັງຫຼາຍ
ເຮົາໄດ້ຟັງວາຈາສຸພາສິດຂອງນົກແຂກເຕົ້າແລ້ວ ຈັກເຮັດບຸນໃຫ້ຫຼາຍ

(ພຣະສາດສະດາເມື່ອຊົງປະກາດຄວາມນັ້ນຈຶ່ງຕັດວ່າ)

[໑໗] ໂກສິຍະພາມນັ້ນມີຄວາມຍິນດີເບີກບານໃຈ
ຈັດແຈງເຂົ້າແລະນ້ຳ ມີຈິດຜ່ອງໃສ
ລ້ຽງດູສະມະນະແລະພາມທັງຫຼາຍໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳ

**ສາລິເກທະຣະຊາດົກທີ ໑ ຈົບ**

# ໘. ຈັນທະກິນນະຣີຊາດົກ (໔໘໕)
## ວ່າດ້ວຍນາງຈັນທະກິນນະຣີ

(ກິນນະຣະປະສົບເວທະນາຄ່ຳຄວນຢູ່ ໄດ້ກ່າວວ່າ)

[໑໘] ນ້ອງຈັນທາ ຊີວິດຂອງອ້າຍນີ້ເຫັນໃກ້ຈະດັບສາແລ້ວ
ເພາະເສຍເລືອດໄປຫຼາຍ ວັນນີ້ອ້າຍຄົງຈະຕາຍລົງຢ່າງແນ່ນອນ
ນ້ອງຈັນທາ ລົມປານຂອງອ້າຍກຳລັງຈະດັບ

[໑໙] ຊີວິດຂອງອ້າຍມີແຕ່ຈະຈົມລົງ ທຸກເຜົາຜານດວງໃຈອ້າຍ
ອ້າຍແສນລຳບາກ ນີ້ເປັນທຸກຂອງອ້າຍ
ຍ້ອນເສົ້າໂສກເຖິງເຈົ້າຈັນທາຜູ້ກຳລັງເສົ້າໂສກ
ບໍ່ແມ່ນຍ້ອນຄວາມເສົ້າໂສກຢ່າງອື່ນ

[໒໐] ອ້າຍຫ່ຽວແຫ້ງເໝືອນຕົ້ນຫຍ້າທີ່ຖືກຖິ້ມໄວ້ເທິງແຜ່ນຫີນທີ່ຮ້ອນແຮງ
ເໝືອນປ່າໄມ້ທີ່ຖືກຕັດຮາກ ທັງຍັງຊູບຊີດເໝືອນແມ່ນ້ຳທີ່ເຫືອດແຫ້ງ
ນີ້ເປັນທຸກຂອງອ້າຍ ເພາະເສົ້າໂສກເຖິງເຈົ້າຈັນທາຜູ້ກຳລັງເສົ້າໂສກ
ບໍ່ແມ່ນຍ້ອນຄວາມເສົ້າໂສກຢ່າງອື່ນ

[໒໑] ນ້ຳຕາເຫຼົ່ານີ້ຂອງອ້າຍຫຼັ່ງໄຫຼໄປເໝືອນຝົນຕົກທີ່ຕີນເຂົາຫຼັ່ງໄຫຼໄປ
ນີ້ເປັນທຸກຂອງອ້າຍ ຍ້ອນເສົ້າໂສກເຖິງເຈົ້າຈັນທາຜູ້ກຳລັງເສົ້າໂສກ
ບໍ່ແມ່ນຍ້ອນຄວາມເສົ້າໂສກຢ່າງອື່ນ

(ນາງຈັນທະກິນນະຣີບໍຣິພາດພຣະຣາຊາວ່າ)

[໒໒] ທ່ານຣາດຊະບຸດ ພຣະອົງຊົ່ວແທ້
ທີ່ຊົງຍິງສາມີທີ່ຮັກຂອງຂ້ານ້ອຍ
ຜູ້ໜ້າສົງສານຢູ່ເຫງົ້າໄມ້ໃນປ່າ
ສາມີຂອງຂ້ານ້ອຍຖືກຍິງນອນຢູ່ເທິງແຜ່ນດິນ

[໒໓] ທ່ານຣາດຊະບຸດ ຂໍພຣະມານດາຂອງພຣະອົງ
ຈົ່ງໄດ້ຮັບຄວາມແຫ້ງພຣະທະໄທ
ເໝືອນຂ້ານ້ອຍຜູ້ຄອງຖ້າສາມີກິນນະຣະ

[໒໔] ທ່ານຣາດຊະບຸດ ຂໍພຣະຊາຍາຂອງພຣະອົງ

ຈຶ່ງໄດ້ຮັບຄວາມແຫ້ງພຣະຫະໄທ
ເໝືອນຂ້ານ້ອຍຜູ້ຄອງຖ້ຳສາມີກິນນະຣະ

[໔໕] ທ່ານຣາດຊະບຸດ ຂໍພຣະມານດາຂອງພຣະອົງ
ຜູ້ຊົງສັງຫານກິນນະຣີຜູ້ບໍ່ປະທຸດສະຮ້າຍ ເພາະຕ້ອງການຂ້ານ້ອຍ
ຈົ່ງຢ່າຊົງພົບເຫັນພຣະຣາດຊະໂອຣົດແລະພຣະຣາດຊະສະວາມີເລີຍ

[໔໖] ທ່ານຣາດຊະບຸດ ຂໍພຣະຊາຍາຂອງພຣະອົງ
ຜູ້ຊົງສັງຫານກິນນະຣະຜູ້ບໍ່ປະທຸດສະຮ້າຍ ຍ້ອນຕ້ອງການຂ້ານ້ອຍ
ຈົ່ງຢ່າຊົງພົບເຫັນພຣະຣາດຊະໂອຣົດແລະພຣະຣາດຊະສະວາມີເລີຍ

(ພຣະຣາຊາຊົງປອບໂຍນນາງຈັນທະກິນນະຣີນັ້ນວ່າ)

[໔໗] ແມ່ຈັນທາ ຜູ້ມີໄນຕາເໝືອນດອກຣາຕີໃນປ່າ
ເຈົ້າຢ່າຮ້ອງໄຫ້ເສົ້າໂສກໄປເລີຍ
ເຈົ້າຈັກໄດ້ເປັນພຣະມະເຫສີຂອງເຮົາທີ່ເຫຼົ່ານາຣີບູຊາໃນຣາດຊະສະກຸນ

(ນາງຈັນທະກິນນະຣີຂາບທູນວ່າ)

[໔໘] ທ່ານຣາດຊະບຸດ ຂ້ານ້ອຍຂໍຍອມຕາຍ
ບໍ່ຂໍເປັນພຣະມະເຫສີຂອງພຣະອົງ
ຜູ້ຊົງສັງຫານກິນນະຣະຜູ້ບໍ່ປະທຸດສະຮ້າຍ
ຍ້ອນຕ້ອງການຂ້ານ້ອຍແນ່ນອນ

(ພຣະຣາຊາໝົດຄວາມຮັກແພງ ຈຶ່ງຕັດວ່າ)

[໔໙] ແມ່ກິນນະຣີຂີ້ຢ້ານ ຜູ້ປາຖະໜາຈະມີຊີວິດຢູ່
ເຈົ້າຈົ່ງໄປສູ່ປ່າຫິມະພານ ຫາເກດສະໜາແລະກະລຳພັກບໍຣິໂພກເທີ້ນ
ເນື້ອເຫຼົ່າອື່ນຈະອະພິຣົມກັບເຈົ້າ

(ນາງຈັນທະກິນນະຣີຄ່ຳຄວນຢ່າງໜັກວ່າ)

[໕໐] ພູ ຮ່ອມພູ ແລະຖ້ຳແຫ່ງພູເຫຼົ່ານັ້ນຍັງຕັ້ງຢູ່ຄືເກົ່າ
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານຢູ່ພູເຫຼົ່ານັ້ນຈະເຮັດແນວໃດ
ເຮົາໄດ້ຮ່ວມອະພິຣົມກັນຢູ່ພູເຫຼົ່າໃດ
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານຢູ່ພູເຫຼົ່ານັ້ນຈະເຮັດແນວໃດ

[໓໑] ພູເຫຼົ່ານັ້ນເຕັມໄປດ້ວຍໃບໄມ້
ໜ້າອອນຊອນ ມີເນື້ອຮ້າຍສັນຈອນໄປມາ
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານຢູ່ພູເຫຼົ່ານັ້ນຈະເຮັດແນວໃດ

[໓໔] ພູເຫຼົ່ານັ້ນເດຍລະດາດໄປດ້ວຍດອກໄມ້
ໜ້າອອນຊອນມີເນື້ອຮ້າຍສັນຈອນໄປມາ
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານຢູ່ພູເຫຼົ່ານັ້ນຈະເຮັດແນວໃດ

[໓໓] ແມ່ນ້ຳແຫ່ງປ່າເຂົາມີກະແສນ້ຳເຕັມໄປດ້ວຍດອກໄມ້
ມີສາຍທານອັນໃສໄຫຼເອື່ອຍຢູ່
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານທີ່ແມ່ນ້ຳນັ້ນຈະເຮັດແນວໃດ

[໓໔] ຈອມພູຫິມະພານທັງຫຼາຍມີສີຂຽວຊະອຸ່ມ ໜ້າທັດສະນາ
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານຢູ່ຈອມພູເຫຼົ່ານັ້ນຈະເຮັດແນວໃດ

[໓໕] ຈອມພູຫິມະພານທັງຫຼາຍມີສີເຫຼືອງອະຮ່າມ ໜ້າທັດສະນາ
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານຢູ່ຈອມພູເຫຼົ່ານັ້ນຈະເຮັດແນວໃດ

[໓໖] ຈອມພູຫິມະພານທັງຫຼາຍມີສີແດງ ໜ້າທັດສະນາ
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານຢູ່ຈອມພູເຫຼົ່ານັ້ນຈະເຮັດແນວໃດ

[໓໗] ພູເຂົາຫິມະພານ ສູງຕະຫງ່ານ ໜ້າທັດສະນາ
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານຢູ່ຈອມພູເຫຼົ່ານັ້ນຈະເຮັດແນວໃດ

[໓໘] ຈອມພູຫິມະພານທັງຫຼາຍ ມີສີຂາວເຜື້ອ ໜ້າທັດສະນາ
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານຢູ່ຈອມພູເຫຼົ່ານັ້ນຈະເຮັດແນວໃດ

[໓໙] ຈອມພູຫິມະພານ ງາມວິຈິດ ໜ້າທັດສະນາ
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານຢູ່ຈອມພູເຫຼົ່ານັ້ນຈະເຮັດແນວໃດ
[໔໐] ຢູ່ພູຄັນທະມາດ ເປັນຖິ່ນບ່ອນຢູ່ອາໄສແຫ່ງໝູ່ເທບເຈົ້າ
ປົກຄຸມໄປດ້ວຍໂອສົດນານາຊະນິດ
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານຢູ່ພູນັ້ນຈະເຮັດແນວໃດ
[໔໑] ຢູ່ພູຄັນທະມາດ ເປັນຖິ່ນບ່ອນຢູ່ອາໄສແຫ່ງໝູ່ກິນນະຣີ
ປົກຄຸມໄປດ້ວຍໂອສົດນານາຊະນິດ
ພໍ່ກິນນະຣະ ເຮົາເມື່ອບໍ່ເຫັນທ່ານຢູ່ພູນັ້ນຈະເຮັດແນວໃດ

(ນາງຈັນທະກິນນະຣີເຫັນສາມີທີ່ຮັກຫາຍໂຣກກໍດີໃຈ ໄຫວ້ທ້າວສັກກະແລ້ວກ່າວວ່າ)

[໔໘] ຂ້າແດ່ເຈົ້າປູ່ຜູ້ປະເສີດ ຂ້ານ້ອຍໄດ້ຢູ່ຮ່ວມກັບສາມີຜູ້ເປັນທີ່ຮັກຍິ່ງ
ຈຶ່ງຂໍຂາບຕີນທັງ ໘ ຂອງທ່ານ
ຜູ້ເຊິ່ງໄດ້ໃຊ້ນ້ຳອຳມະຣິດຮົດສາມີຂ້ານ້ອຍຜູ້ໜ້າຮັກໜ້າປາຖະໜາ
[໔໙] ບັດນີ້ ຂ້າພະເຈົ້າທັງ ໘ ຈະທ່ຽວໄປສູ່ແມ່ນ້ຳແຫ່ງປ່າເຂົາ
ອັນມີກະແສນ້ຳເຕັມໄປດ້ວຍດອກໄມ້ ອາໄສຢູ່ຕາມຕົ້ນໄມ້ຕ່າງ ໆ
ເຈຣະຈາແຕ່ຄຳອັນເປັນທີ່ຮັກຕໍ່ກັນແລະກັນ

**ຈັນທະກິນນະຣີຊາດົກທີ ໘ ຈົບ**

## ໙. ມະຫາອຸກກຸສະຊາດົກ (໔໗໖)
## ວ່າດ້ວຍພະຍານົກອອກຊ່ອຍເພື່ອນ

(ແມ່ແຫຼວເວົ້າກັບພະຍາແຫຼວວ່າ)

[໔໔] ພວກຊາວຊົນນະບົດພາກັນມັດຄົບເພິງຢູ່ເທິງເກາະ
ປະສົງຈະກິນລູກນ້ອຍ ໆ ຂອງເຮົາ
ອ້າຍພະຍາແຫຼວ ຂໍທ່ານຈົ່ງໄປບອກມິດສະຫາຍ
ເລົ່າເຖິງຄວາມພິນາດແຫ່ງໝູ່ຍາດຂອງນົກທັງຫຼາຍ

(ແຫຼວນັ້ນຖືກຖາມຈຶ່ງສະແດງເຫດທີ່ຕ້ອງມາວ່າ)

[໔໕] ຂ້າແດ່ພໍ່ພະຍານົກຣາດຊະປັກສີ
ທ່ານເປັນນົກທີ່ປະເສີດກວ່ານົກທັງຫຼາຍ
ຂ້າພະເຈົ້າຂໍຢຶດທ່ານເປັນບ່ອນເພິ່ງ
ພວກນາຍພານຊາວຊົນນະບົດປະສົງຈະກິນລູກນ້ອຍ ໆ ຂອງຂ້າພະເຈົ້າ
ເພື່ອຄວາມສຸກຂອງຂ້າພະເຈົ້າ ຂໍທ່ານຈົ່ງເປັນບ່ອນເພິ່ງດ້ວຍເທີ້ນ

(ພະຍານົກຕອບແຫຼວວ່າ)

[໔໖] ບັນດິດທັງຫຼາຍຜູ້ສະແຫວງຫາຄວາມສຸກຢູ່
ຍ່ອມຄົບມິດສະຫາຍທັງໃນການແລະບໍ່ແມ່ນການ
ເຈົ້າແຫຼວ ເຮົາຈະເຮັດຕາມຄວາມປະສົງຂອງເຈົ້ານັ້ນ
ຍ້ອນວ່າຄົນດີຈະຕ້ອງຊ່ອຍເຫຼືອຄົນດີ

(ແຫຼວຟັງດັ່ງນັ້ນແລ້ວເຂົ້າໄປຫາພະຍານົກພ້ອມເຊື້ອເຊີນວ່າ)

[໔໗] ກິດອັນໃດເປັນກິດທີ່ຄົນດີຈະເພິ່ງກະທຳໃຫ້ຄົນດີ
ດ້ວຍຄວາມອະນຸເຄາະກິດອັນນີ້ທ່ານກໍໄດ້ເຮັດແລ້ວ
ທ່ານຈົ່ງຖະໜອມຕົວໄວ້ເທີ້ນ ຢ່າໄດ້ເດືອດຮ້ອນໄປເລີຍ
ເມື່ອທ່ານຍັງມີຊີວິດຢູ່ ຂ້າພະເຈົ້າກໍຈະໄດ້ລູກຕໍ່ໄປ

(ພະຍານົກບັນລືສີຫະນາດວ່າ)

[໔໘] ເຮົາເມື່ອຈະທຳການຮັກສາປ້ອງກັນທ່ານນັ້ນ
ແມ່ນຕົວຈະຕາຍກໍບໍ່ຫວາດຫວັ່ນ
ຍ້ອນເພື່ອນທັງຫຼາຍເຫຼົ່ານັ້ນຈະຕ້ອງສະລະຊີວິດ
ເຮັດເພື່ອເພື່ອນທັງຫຼາຍ
ນີ້ເປັນທຳຂອງສັດຕະບຸຣຸດ

(ພຣະສາດສະດາຊົງສັນເສີນທ່ານຂອງພະຍານົກນັ້ນວ່າ)

[໔໙] ພະຍານົກຕົວນີ້ເກີດຈາກໜ່ວຍໄຂ່ ໄດ້ເຮັດກຳທີ່ເຮັດໄດ້ຍາກ
ເພື່ອຕ້ອງການຈະຊ່ອຍລູກນົກທັງຫຼາຍເກືອບທ່ຽງຄືນ

(ຝ່າຍແຫຼວໄປຫາເຕົ່າແລ້ວກ່າວວ່າ)

[໕໐] ຈິງຢູ່ ຄົນບາງພວກແມ່ນຈະເຄື່ອນຄາດຈາກໄປ
ຈາກວຽກງານຂອງຕົນ ກໍຍັງດຳຣົງຕົນຢູ່ໄດ້
ຍ້ອນຄວາມຊ່ອຍເຫຼືອຂອງມິດທັງຫຼາຍ
ລູກ ໆ ຂອງຂ້າພະເຈົ້າມີຄວາມເດືອດຮ້ອນ
ຂ້າພະເຈົ້າຈຶ່ງມາຫາທ່ານໃຫ້ເປັນບ່ອນເພິ່ງ ທ່ານພະຍາເຕົ່າ
ຂໍທ່ານພ່ຳເພັງສິ່ງທີ່ເປັນປະໂຫຍດແກ່ຂ້າພະເຈົ້າດ້ວຍເທີ້ນ

(ເຕົ່າຟັງແລ້ວກ່າວວ່າ)

[໕໑] ບັນດິດທັງຫຼາຍຍ່ອມທຳການຜູກມິດຜູກສະຫາຍ
ດ້ວຍຊັບແດ່ ດ້ວຍເຂົ້າເປືອກແດ່ ດ້ວຍຕົນແດ່
ພະຍາແຫຼວ ເຮົາຈະເຮັດສິ່ງທີ່ເປັນປະໂຫຍດແກ່ທ່ານ
ຍ້ອນວ່າຄົນດີຈະຕ້ອງຊ່ອຍເຫຼືອຄົນດີ

(ລູກເຕົ່ານອນຢູ່ບໍ່ໄກໄດ້ຍິນບິດາເວົ້າ ຈຶ່ງກ່າວວ່າ)

[໔໔] ທ່ານພໍ່ ຂໍພໍ່ຈົ່ງຂວນຂວາຍໜ້ອຍນັ່ງຢູ່ເສີຍ ໆ ເທີ້ນ
ລູກຈະຊ່ອຍພໍ່າເພັງປະໂຫຍດແທນພໍ່
ລູກຈະປ້ອງກັນລູກນ້ອຍ ໆ ຂອງພະຍາແຫຼວ
ພໍ່າເພັງປະໂຫຍດນັ້ນແທນພໍ່ເອງ

(ພໍ່ເຕົ່າກ່າວກັບລູກວ່າ)

[໔໓] ລູກຮັກ ຈິງຢູ່ ການທີ່ລູກເພິ່ງຊ່ອຍເຫຼືອ
ພໍ່າເພັງປະໂຫຍດແທນພໍ່ນັ້ນ
ເປັນທໍາຂອງສັດຕະບຸຣຸດໂດຍແທ້
ບາງທີພວກນາຍພານເຫັນພໍ່ເຊິ່ງມີຮ່າງກາຍໃຫຍ່ໂຕ
ກໍຈະບໍ່ເພິ່ງບຽດບຽນລູກນົກນ້ອຍ ໆ ຂອງພະຍາແຫຼວ

(ແຫຼວໄປຫາຣາດຊະສີເມື່ອຖືກຖາມ ຈຶ່ງກ່າວວ່າ)

[໔໔] ທ່ານຜູ້ປະເສີດກວ່າເນື້ອຜູ້ກ້າຫານ
ສັດດີຣັດສານແລະມະນຸດເດືອດຮ້ອນ
ເພາະອັນຕະລາຍຍ່ອມເຂົ້າໄປຫາທ່ານຜູ້ປະເສີດ
ລູກນ້ອຍ ໆ ຂອງຂ້າພະເຈົ້າມີຄວາມເດືອດຮ້ອນ
ຂ້າພະເຈົ້າຈຶ່ງມາຫາທ່ານໃຫ້ເປັນບ່ອນເພິ່ງ ທ່ານເປັນຣາຊາຂອງຂ້າພະເຈົ້າ
ເພື່ອຄວາມສຸກຂອງຂ້າພະເຈົ້າ ຂໍທ່ານຈົ່ງເປັນບ່ອນເພິ່ງດ້ວຍເທີ້ນ

(ຣາດຊະສີຟັງແລ້ວກ່າວວ່າ)

[໔໕] ແຫຼວ ເຮົາຈະເຮັດສິ່ງທີ່ເປັນປະໂຫຍດແກ່ທ່ານ
ເຮົາມາກໍເພື່ອຈະຂ້າໝູ່ສັດຕູຂອງທ່ານ
ທໍາມະດາວິນຍູຊົນຜູ້ມີຄວາມສາມາດຮູ້ຢູ່
ຈະບໍ່ພະຍາຍາມຄຸ້ມຄອງມິດຜູ້ສະເໝີດ້ວຍຕົນໄດ້ແນວໃດ

(ແມ່ແຫຼວປະກາດມິດຕະທໍາວ່າ)

[໔໖] ເພື່ອບັນລຸເຖິງຄວາມສຸກ ບຸກຄົນຄວນຄົບມິດສະຫາຍຜູ້ມີໃຈດີ
ແລະບຸກຄົນຜູ້ເປັນເຈົ້ານາຍ

ເຮົາທັງຫຼາຍເປັນຜູ້ພ້ອມພຽງກັບລູກ ໆ ບັນເທີງໃຈຢູ່
ເໝືອນຄົນສວມເກາະປ້ອງກັນລູກສອນ

[໔໗] ລູກນົກນ້ອຍ ໆ ສົ່ງສຽງຄູຂັນຢູ່ຢ່າງມ່ວນຈັບໃຈ
ຕ້ອນຮັບເຮົາແລະທ່ານຜູ້ກຳລັງຄູຂັນ
ຍ້ອນການກະທຳຂອງມິດສະຫາຍຜູ້ບໍ່ໜີໄປຂອງຕົນ

[໔໘] ບັນດິດນັ້ນໄດ້ມິດສະຫາຍແລ້ວຍ່ອມປ້ອງກັນລູກ
ປະສຸສັດ ຫຼືຊັບໄວ້ໄດ້
ຂ້າພະເຈົ້າ ລູກ ໆ ແລະສາມີຂອງຂ້າພະເຈົ້າຢູ່ພ້ອມໜ້າກັນ
ຍ້ອນຄວາມຊ່ອຍເຫຼືອຂອງມິດທັງຫຼາຍ

[໔໙] ອັນບຸກຄົນຜູ້ມີເຈົ້ານາຍແລະເພື່ອນຜູ້ກ້າຫານອາດຈະໄດ້ຮັບປະໂຫຍດ
ສຳລັບຜູ້ທີ່ມີເພື່ອນພຽບພ້ອມກໍຈະມີເພື່ອນຮ່ວມງານເຊັ່ນນີ້
ເຂົາກໍຈະມີມິດ ມີຍົດ ມີຄວາມຮຸ່ງເຮືອງ ບັນເທີງໃຈຢູ່ໃນໂລກນີ້ເດີ້ ອ້າຍທີ່ຮັກ

[໕໐] ອ້າຍເສນະກະ ຄວນຈະຜູກມິດແມ່ນກັບຄົນທຸກຍາກ ເບິ່ງເທີ້ນ
ພວກເຮົາມາພ້ອມພຽງກັບໝູ່ຍາດໄດ້ຍ້ອນຄວາມຊ່ອຍເຫຼືອຂອງມິດ

[໕໑] ນົກຕົວໃດຜູກມິດໄວ້ກັບມິດຜູ້ກ້າຫານແລະມິດຜູ້ມີກຳລັງ
ນົກຕົວນັ້ນຍ່ອມມີຄວາມສຸກເໝືອນຢ່າງເຮົາແລະທ່ານເດີ້ ອ້າຍເສນະກະ

**ມະຫາອຸກກຸສະຊາດົກທີ ໓ ຈົບ**

## ໔. ອຸດທາລະກະຊາດົກ (໔໘໗)
## ວ່າດ້ວຍອຸດທາລະກະດາບົດ

(ພຣະຣາຊາຊົງສົນທະນາກັບປຸໂຣຫິດວ່າ)

[໕໔] ຊະດີນເຫຼົ່າໃດນຸ່ງຫົ່ມໜັງສັດທີ່ຊຸຂະ
ມີຂີ້ແຂ້ວເຂິ ຮ່າງກາຍສົກກະປົກ ສາທະຍາຍມົນຢູ່
ຊະດີນເຫຼົ່ານັ້ນປະກອບໜ້າທີ່ວຽກງານຂອງມະນຸດ
ຈະຮູ້ແຈ້ງໂລກນີ້ແລ້ວພົ້ນຈາກອະບາຍໄດ້ບໍ?

(ປຸໂຣຫິດທູນວ່າ)

[໖໓]	ຂໍເດຊະພຣະຣາຊາ ຫາກບຸກຄົນເຖິງຈະເປັນພະຫູສູດ
ເຮັດແຕ່ກຳຊົ່ວ ກໍຊື່ວ່າບໍ່ປະພຶດທຳ
ເຂົາແມ່ນຈະມີພຣະເວດເປັນພັນ ອາໄສຄວາມເປັນພະຫູສູດນັ້ນ
ແຕ່ບໍ່ບັນລຸຈະຣະນະທຳ ກໍພົ້ນຈາກທຸກບໍ່ໄດ້

(ອຸດທາລະກະດາບົດກ່າວກັບປຸໂຣຫິດວ່າ)

[໖໔]	ບຸກຄົນແມ່ນຈະມີພຣະເວດເປັນພັນ ອາໄສຄວາມເປັນພະຫູສູດນັ້ນ
ແຕ່ບໍ່ບັນລຸຈະຣະນະທຳ ກໍພົ້ນຈາກທຸກບໍ່ໄດ້
ອາດຕະມາເຂົ້າໃຈວ່າ ພຣະເວດທັງຫຼາຍເປັນສິ່ງທີ່ຂາດຜົນ
ຈະຣະນະທຳພ້ອມທັງຄວາມສັງລວມທີ່ນັ້ນເປັນສັດຈະ

(ປຸໂຣຫິດກ່າວວ່າ)

[໖໕]	ພຣະເວດທັງຫຼາຍຈະຂາດຜົນກໍບໍ່ແມ່ນ
ຈະຣະນະທຳພ້ອມທັງຄວາມສັງລວມທີ່ນັ້ນເປັນສັດຈະ
ຍ້ອນບຸກຄົນບັນລຸພຣະເວດທັງຫຼາຍແລ້ວຍ່ອມໄດ້ກຽດ
ບຸກຄົນຜູ້ເຝິກຕົນດີແລ້ວດ້ວຍຈະຣະນະທຳຍ່ອມບັນລຸຄວາມສະງົບ

(ອຸດທາລະກະດາບົດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໖໖]	ມານດາບິດາແລະເຜົ່າພັນທັງຫຼາຍທີ່ບຸກຄົນຈະຕ້ອງລ້ຽງດູ
ບຸດເກີດແຕ່ຜູ້ໃດ ເຂົາກໍຄືຜູ້ນັ້ນນັ້ນເອງ
ອາດຕະມາຊື່ວ່າອຸດທາລະກະ ເປັນວົງແຫ່ງໂສດຖິຍະສະກຸນຂອງທ່ານ

(ພາມຖາມເຖິງທຳນຽມຂອງພາມວ່າ)

[໖໗]	ທ່ານຜູ້ຈະເລີນ ຄົນຈະເປັນພາມໄດ້ແນວໃດ
ຈະເປັນພາມເຕັມຕົວໄດ້ແນວໃດ
ປະຣິນິບພານຈະມີໄດ້ແນວໃດ
ແລະຄົນຜູ້ຊົງທຳ ບັນດິດກ່າວຮຽກວ່າແນວໃດ

(ອຸດທາລະກະດາບົດຕອບວ່າ)

[໖໘]	ເພາະດັງໄຟບູຊາຢູ່ເນືອງ ໆ ບຸກຄົນຈຶ່ງຊື່ວ່າເປັນພາມ
ບຸກຄົນເມື່ອຫົດນ້ຳບູຊາຍັນແລະໃຫ້ຍົກເສົາບູຊາຍັນ

ຈຶ່ງຊື່ວ່າເປັນພາມເຕັມຕົວ
ພາມຜູ້ພໍ່າເພັງແນວນີ້ຊື່ວ່າເປັນຜູ້ກະເສມ
ຍ້ອນເຫດນັ້ນ ບັນດິດທັງຫຼາຍຍ່ອມຮຽກວ່າຜູ້ດໍາຣົງຢູ່ໃນທໍາ

(ປຸໂຣຫິດຕໍາໜິທໍານຽມຂອງພາມວ່າ)

[໗໙] ຄວາມບໍລິສຸດຍ່ອມມີຍ້ອນການທົດນໍ້າກໍບໍ່ແມ່ນ
ແມ່ນຈະເປັນພາມເຕັມຕົວກໍບໍ່ແມ່ນ
ຂັນຕິແລະໂສຣັດຈະກໍບໍ່ມີແກ່ບຸກຄົນນັ້ນ
ແມ່ນເຂົາຊື່ວ່າໄດ້ປະຣິນິບພານຍ້ອນດັບກິເລດກໍບໍ່ແມ່ນ

(ອຸດທາລະກະດາບົດຖາມວ່າ)

[໘໐] ບຸກຄົນຈະເປັນພາມໄດ້ແນວໃດ
ຈະເປັນພາມເຕັມຕົວໄດ້ແນວໃດ
ປະຣິນິບພານຈະມີໄດ້ແນວໃດ
ແລະບຸກຄົນຜູ້ຕັ້ງຢູ່ໃນທໍາ ບັນດິດກ່າວຮຽກວ່າແນວໃດ

(ປຸໂຣຫິດບອກວ່າ)

[໘໑] ບຸກຄົນຜູ້ບໍ່ມີໄຮ່ນາ ບໍ່ມີເຜົ່າພັນ ບໍ່ຍຶດຖືວ່າເປັນຂອງເຮົາ
ບໍ່ມີຄວາມຫວັງ ໝົດຄວາມໂລບອັນເປັນບາບ
ມີຄວາມໂລບໃນພົບໝົດສິ້ນແລ້ວ
ຜູ້ພໍ່າເພັງຢ່າງນີ້ຊື່ວ່າເປັນພາມ ຊື່ວ່າຜູ້ມີຄວາມກະເສມ
ຍ້ອນເຫດນັ້ນ ບັນດິດທັງຫຼາຍຮຽກວ່າ ຜູ້ຕັ້ງຢູ່ໃນທໍາ

(ອຸດທາລະກະດາບົດກ່າວວ່າ)

[໘໔] ກະສັດ ພາມ ແພດ ສູດ ຄົນຈັນທານ
ແລະຄົນຖອກຂີ້ເຫຍື່ອທັງຫຼາຍ
ລ້ວນແຕ່ເປັນຜູ້ສະງົບສະງ່ຽມ
ເຝິກຕົນແລ້ວ ລ້ວນແຕ່ໄດ້ປະຣິນິບພານແລ້ວ
ເມື່ອທຸກຄົນມີຄວາມສະງົບເຢືອກເຢັນ
ຍັງຈະມີຄົນດີແລະຄົນຊົ່ວອີກບໍນໍ

(ພາມກ່າວວ່າ)

[໗໖] ກະສັດ ພາມ ແພດ ສູດ ຄົນຈັນທານ
ແລະຄົນຖອກຂີ້ເຫຍື່ອທັງຫຼາຍລ້ວນແຕ່ເປັນຜູ້ສະງົບສະງ່ຽມ
ເຝິກຕົນແລ້ວ ລ້ວນແຕ່ໄດ້ປະຣິນິບພານແລ້ວ
ເມື່ອທຸກຄົນມີຄວາມສະງົບເຢືອກເຢັນຍ່ອມບໍ່ມີທັງຄົນດີແລະຄົນຊົ່ວ

(ອຸດທາລະກະດາບົດຕິຕຽນພາມວ່າ)

[໗໔] ກະສັດ ພາມ ແພດ ສູດ ຄົນຈັນທານ
ແລະຄົນຖອກຂີ້ເຫຍື່ອທັງຫຼາຍລ້ວນແຕ່ເປັນຜູ້ສະງົບສະງ່ຽມ
ເຝິກຕົນແລ້ວ ລ້ວນແຕ່ໄດ້ປະຣິນິບພານແລ້ວ

[໗໕] ເມື່ອທຸກຄົນມີຄວາມສະງົບເຢືອກເຢັນ
ຍ່ອມບໍ່ມີທັງຄົນດີແລະຄົນຊົ່ວ
ເມື່ອເປັນເຊັ່ນນັ້ນ ທ່ານຈະປະພຶດໃຫ້ເສຍຄວາມເປັນພາມ
ວົງແຫ່ງໂສດຖິຍະສະກຸນເຮັດຫຍັງ

(ປຸໂຣຫິດປຽບທຽບໃຫ້ເຂົ້າໃຈວ່າ)

[໗໖] ວິມານທີ່ຄຸມດ້ວຍຜ້າເຊິ່ງຍ້ອມດ້ວຍສີຕ່າງ ໆ
ຜ້າເຫຼົ່ານັ້ນມີແຕ່ເງົາ ສີທີ່ຍ້ອມນັ້ນບໍ່ຜາກົດ

[໗໗] ໃນໝູ່ມະນຸດກໍຄືກັນ ເມື່ອໃດຄົນທັງຫຼາຍບໍລິສຸດ
ເປັນຜູ້ມີຂໍ້ວັດດີຍ້ອນຮູ້ທົ່ວເຖິງທຳ
ເມື່ອນັ້ນພວກເຂົາຍ່ອມປ່ອຍວາງຊາດຂອງຕົນສາໄດ້

**ອຸດທາລະກະຊາດົກທີ ໔ ຈົບ**

## ໕. ພິສະຊາດົກ (໔໘໘)
## ວ່າດ້ວຍທ້າວສັກກະລັກເຫງົ້າບົວເພື່ອລອງໃຈລືສີ

(ອຸປະກັນຈະນະດາບົດສາບານວ່າ)

[໗໘] ທ່ານພາມ ຜູ້ໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຂໍຜູ້ນັ້ນຈົ່ງໄດ້ມ້າ ງົວ ເງິນ ຄຳ ແລະພັນລະຍາທີ່ໜ້າພໍໃຈໃນໂລກນີ້

ແລະຈົ່ງເປັນຜູ້ພຽບພ້ອມໄປດ້ວຍບຸດພັນລະຍາຫຼາຍ

(ດາບົດຜູ້ນ້ອງຊາຍຄົນທີ ໘ ເມື່ອຈະຊຳຣະຕົນໃຫ້ມົດຈົດ ຈຶ່ງສາບານວ່າ)

[໗໙] ທ່ານພາມ ຜູ້ໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຂໍຜູ້ນັ້ນຈົ່ງທັດຊົງລະບຽບດອກໄມ້ ນຸ່ງຫົ່ມຜ້າແຄວ້ນກາສີ
ລູບໄລ້ຈຸນແກ່ນຈັນ ແລະເຂົາຈົ່ງມີບຸດຫຼາຍ ໆ
ອັນໜຶ່ງ ຈົ່ງທຳຄວາມມີເຍື່ອໃຍຢ່າງແຮງກ້າໃນກາມທັງຫຼາຍ

(ດາບົດນ້ອງຊາຍທີ່ເຫຼືອຕ່າງກ່າວສາບານວ່າ)

[໘໐] ທ່ານພາມ ຜູ້ໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຜູ້ນັ້ນເປັນກະສິກອນ ຈົ່ງມີເຂົ້າເປືອກຫຼວງຫຼາຍ
ເປັນຄະລືຫັດ ຈົ່ງມີຍົດ ມີບຸດຫຼາຍ
ມີຊັບ ມີວັດຖຸທີ່ໜ້າຕ້ອງການທັງປວງ
ຢ່າໄດ້ເຫັນຄວາມເສື່ອມ ຢູ່ຄອງເຮືອນເທີ້ນ

[໘໑] ທ່ານພາມ ຜູ້ໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຂໍຜູ້ນັ້ນຈົ່ງໄດ້ອະພິເສກເປັນກະສັດ
ເປັນພຣະຣາຊາຍິ່ງໃຫຍ່ກວ່າພຣະຣາຊາທັງຫຼາຍ
ຊົງມີພະລັງ ປະກອບດ້ວຍພຣະອິດສະຣິຍະຍົດ
ຊົງຄອບຄອງແຜ່ນດິນມີມະຫາສະມຸດທັງ ໔ ເປັນຂອບເຂດເທີ້ນ

[໘໘] ທ່ານພາມ ຜູ້ໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຜູ້ນັ້ນເປັນພາມ ຈົ່ງຢ່າໄດ້ຄາຍຄວາມຍິນດີ (ໃນຕຳແໜ່ງ)
ຊ່ຽວຊານໃນຄອງແຫ່ງເລີກຍາມແລະນັກຂະສັດ
ເຈົ້າຜູ້ຄອງແຄວ້ນຜູ້ຊົງຍົດ ຈົ່ງບູຊາເຂົາເທີ້ນ

[໘໓] ທ່ານພາມ ຜູ້ໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຂໍຊາວໂລກທັງປວງຈົ່ງສຳຄັນຜູ້ນັ້ນວ່າ
ເປັນຄູສອນເວດມົນທຸກຂະນິດ ມີຕະບະ
ຂໍຊາວຊົນນະບົດຈົ່ງມຸ້ງໄປບູຊາເຂົາພ້ອມ ໆ ກັນ

[໘໔] ທ່ານພາມ ຜູ້ໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຂໍຜູ້ນັ້ນຈົ່ງເກັບກິນບ້ານສ່ວຍທີ່ມັ່ງຄັ່ງສົມບູນດ້ວຍເຫດ ໔ ປະການ[1]

ເໝືອນທ້າວວາສະວະປະທານໃຫ້
ຈົ່ງຢ່າໄດ້ຄາຍຄວາມກຳໜັດຈົນກະທັ້ງຕາຍ

[໗໘] ທ່ານພາມ ຜູ້ໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຂໍຜູ້ນັ້ນຈົ່ງເປັນນາຍບ້ານ
ບັນເທີງໃຈຢູ່ດ້ວຍການຟ້ອນລຳຂັບຮ້ອງໃນທ່າມກາງໝູ່ສະຫາຍ
ຈົ່ງຢ່າໄດ້ຮັບຄວາມພິນາດອັນໃດ ໆ ຈາກພຣະຣາຊາເລີຍ

[໗໙] ທ່ານພາມ ຍິງໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຂໍອີງເອກອັກຄະຣະຣາຊາຊົງປາບປາມສັດຕູທົ່ວພື້ນປະຖະພີ
ຈົ່ງສະຖາປະນາຍິງນັ້ນໃນຕຳແໜ່ງສູງກວ່າຍິງອື່ນ
ແລະປະເສີດກວ່າຍິງພາຍໃນຂອບຂັນທະສີມາ

[໗໑] ທ່ານພາມ ຍິງໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຂໍຍິງນັ້ນຢ່າໄດ້ຫວາດຫວັ່ນທ່າມກາງນາງທາສີທັງຫຼາຍ
ທີ່ມາປະຊຸມພ້ອມກັນ ເພິ່ງບໍຣິໂພກຂອງແຊບ
ຈົ່ງປະພຶດໂອ້ອວດຍ້ອນລາບຢູ່ເທີ້ນ

[໗໗] ທ່ານພາມ ຜູ້ໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຂໍຜູ້ນັ້ນຈົ່ງເປັນຜູ້ປະຕິບັດທີ່ຢູ່ໃນມະຫາວິຫານ
ຈົ່ງເປັນນັກກໍ່ສ້າງໃນກະຊັງຄະລະນະຄອນ ຈົ່ງເຮັດໜ້າຕ່າງຕະຫຼອດວັນ[១]

[໗໙] ທ່ານພາມ ຊ້າງເຊືອກໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຂໍຊ້າງເຊືອກນັ້ນຈົ່ງຖືກຄ້ອງດ້ວຍບ້ວງບາດຕັ້ງຮ້ອຍທີ່ອະໄວຍະວະ ໖ ແຫ່ງ
ຈົ່ງຖືກນຳອອກຈາກປ່າອັນໜ້າອອນຊອນໄປສູ່ຣາດຊະທານີ
ຈົ່ງຖືກຂໍສັບ ຖືກປະຕັກແທງ

[໙໐] ທ່ານພາມ ລີງຕົວໃດໄດ້ລັກເຫງົ້າບົວຂອງທ່ານໄປ
ຂໍລີງຕົວນັ້ນຈົ່ງສວມໃສ່ພວງດອກຮັກຂາວ
ຖືກເຈາະຫູ ຫ້ອຍດີບຸກ ຖືກຄຸ້ງນດ້ວຍຮຽວໄມ້ ເຂົ້າໄປໃກ້ປາກງູ
ຈົ່ງຖືກລ່າມໂຊ່ຕະເວນທ່ຽວໄປຕາມຮ່ອມເທີ້ນ

(ພຣະໂພທິສັດສາບານວ່າ)

[໙໑] ຜູ້ໃດແລກ່າວເຖິງສິ່ງທີ່ບໍ່ຫາຍວ່າຫາຍ

ຫຼືວ່າຜູ້ໃດສົງໄສໃຜ ໆ ກໍຕາມ
ຂໍຜູ້ນັ້ນຈົ່ງໄດ້ປະສົບແລະຊ່ອງເສບກາມທັງຫຼາຍ
ທ່າມກາງເຮືອນຈົນກະທັ້ງຕາຍ

(ທ້າວສັກກະຖາມພຣະໂພທິສັດວ່າ)

[໗໘] ການເປັນສິ່ງທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າຮັກ ແລະໜ້າພໍໃຈ
ຂອງເທວະດາແລະມະນຸດເປັນຈຳນວນຫຼາຍໃນຊີວະໂລກນີ້
ທີ່ສັດທັງຫຼາຍຫ່ງວສະແຫວງຫາຢູ່ໃນໂລກ
ເປັນຫຍັງລືສີທັງຫຼາຍຈຶ່ງບໍ່ສັນເສີນການທັງຫຼາຍ

(ພຣະໂພທິສັດແກ້ບັນຫາຂອງທ້າວສັກກະວ່າ)

[໗໙] ຍ້ອນການທັງຫຼາຍແລ ສັດທັງຫຼາຍຍ່ອມຂ້າກັນ
ແລະຍ່ອມຈອງຈຳກັນ
ຍ້ອນການທັງຫຼາຍຈຶ່ງເກີດທຸກ ເກີດໄພ
ທ້າວສັກກະຜູ້ເປັນຈອມເທບ ຍ້ອນການທັງຫຼາຍ
ສັດທັງຫຼາຍຈຶ່ງຜະໝາດ ເຮັດກຳຊົ່ວຍ້ອນໂມຫະ

[໗໔] ສັດເຫຼົ່ານັ້ນຜູ້ມີທຳຊົ່ວກໍປະສົບສິ່ງທີ່ຊົ່ວ
ເມື່ອຕາຍໄປກໍຕົກນະຣົກ
ເພາະສະນັ້ນ ລືສີທັງຫຼາຍເຫັນໂທດໃນການມະຄຸນທັງຫຼາຍ
ຈຶ່ງບໍ່ສັນເສີນການທັງຫຼາຍ

(ທ້າວສັກກະຕັດວ່າ)

[໗໕] ຂ້ານ້ອຍເມື່ອຈະທົດລອງລືສີທັງຫຼາຍ
ຈຶ່ງຈັບເອົາເຫງົ້າບົວເຊິ່ງວາງໄວ້ທີ່ແຄມຝັ່ງແລ້ວໄປຝັງໄວ້ເທິງບົກ
ພຣະຜູ້ເປັນເຈົ້າຜູ້ປະພຶດພົມມະຈັນທັງຫຼາຍ
ລືສີທັງຫຼາຍຢູ່ຢ່າງບໍຣິສຸດ ບໍ່ມີຜູ້ຊົ່ວຊ້າ ນີ້ເຫງົ້າບົວຂອງທ່ານ

(ພຣະໂພທິສັດໄດ້ຟັງດັ່ງນັ້ນ ຈຶ່ງກ່າວຄາຖາວ່າ)

[໗໖] ລືສີທັງຫຼາຍບໍ່ແມ່ນນັກຟ້ອນສຳລັບພຣະອົງ
ແລະບໍ່ແມ່ນບຸກຄົນທີ່ຈະເພິ່ງຫຍອກຫຼິ້ນ

ບໍ່ແມ່ນຍາດ ແລະບໍ່ແມ່ນສະຫາຍຂອງພຣະອົງ
ຂໍຖວາຍພຣະພອນ ທ້າວສະທັດສະໄນເທວະຣາດ
ອາໄສເຫດອັນໃດ ພຣະອົງຈຶ່ງໄດ້ຫຍອກຫຼິ້ນກັບລືສີທັງຫຼາຍ

(ທ້າວສັກກະຂໍຂະມາພຣະໂພທິສັດວ່າ)

[໙໗] ທ່ານພາມ ຂໍພຣະຜູ້ເປັນເຈົ້າຈົ່ງເປັນທັງອາຈານ
ແລະບິດາຂອງຂ້ານ້ອຍ
ຂໍ້ນີ້ຂໍຈົ່ງເປັນບ່ອນເພິ່ງແກ່ຂ້ານ້ອຍຜູ້ພັ້ງພາດໄປແລ້ວ
ທ່ານຜູ້ມີປັນຍາພຽງດັ່ງແຜ່ນດິນ ຂໍທ່ານຈົ່ງງົດໂທດເທື່ອນີ້ເທີ້ນ
ບັນດິດທັງຫຼາຍຍ່ອມບໍ່ຖືໂກດ

(ພຣະໂພທິສັດງົດໂທດຕໍ່ທ້າວສັກກະແລ້ວໃຫ້ໝູ່ລືສີຍົກໂທດໃຫ້ວ່າ)

[໙໘] ຄືນດຽວທີ່ພວກລືສີຢູ່ໃນປ່າກໍນັບວ່າຢູ່ດີແລ້ວ
ຍ້ອນພວກເຮົາໄດ້ເຫັນທ້າວສັກກະຜູ້ເປັນຈອມເທບ
ຂໍພຣະຜູ້ເປັນເຈົ້າທັງປວງຈົ່ງພໍໃຈ ຍ້ອນພາມໄດ້ເຫງົ້າບົວຄືນມາ

(ພຣະສາດສະດາໄດ້ຕັດຄາຖາປະມວນຊາດົກວ່າ)

[໙໙] ໃນການນັ້ນ ຕະຖາຄົດ ສາລີບຸດ ໂມກຄັນລານະ
ກັດສະປະ ອະນຸຣຸດທະ ປຸນນະ ແລະອານົນ ທັງ ໗ ເປັນອ້າຍນ້ອງກັນ

[໑໐໐] ໃນການນັ້ນ ອຸບົນວັນນາເປັນນ້ອງສາວ ຂຸດຊຸດຕະຣາເປັນທາສີ
ຈິດຕະຄະຫະບໍດີເປັນທາດ ສາຕາຄີຣະເປັນຍັກ

[໑໐໑] ໃນການນັ້ນ ປາລິເລີຍຍະໄດ້ເປັນຊ້າງ
ວານອນທີ່ຖວາຍນ້ຳເຜີ້ງໄດ້ເປັນວານອນຕົວປະເສີດ
ກາລຸທາຍີໄດ້ເປັນທ້າວສັກກະ ພວກທ່ານຈົ່ງຊົງຈຳຊາດົກໄວ້ແນວນີ້

**ພິສະຊາດົກທີ ໕ ຈົບ**

## ໖. ສຸຣຸຈິຊາດົກ (໔໘໙)
## ວ່າດ້ວຍພຣະມະເຫສີຂອງພຣະເຈົ້າສຸຣຸຈິ

(ພຣະນາງສຸເມທາສະດັບພຣະດຳຣັດຂອງທ້າວສັກກະແລ້ວໄດ້ບອກຄຸນຄືສິນຂອງຕົນວ່າ)

[໑໐໘] ຂ້ານ້ອຍເປັນຍິງທີ່ສາມີເພິ່ງລ້ຽງດູ
ເຊິ່ງຖືກເຊີນມາເປັນມະເຫສີຂອງພຣະເຈົ້າສຸຣຸຈິເປັນຄົນທຳອິດ
ພຣະເຈົ້າສຸຣຸຈິໄດ້ນຳຂ້ານ້ອຍມາ ໑໐,໐໐໐ ປີແລ້ວ

[໑໐໓] ທ່ານພາມ ຂ້ານ້ອຍນັ້ນຍັງບໍ່ຮູ້ສຶກເລີຍວ່າ
ໄດ້ລ່ວງເກີນພຣະເຈົ້າສຸຣຸຈິຜູ້ຄອບຄອງມິຖິລານະຄອນ ແຄວັນວິເທຫະ
ດ້ວຍກາຍ ວາຈາ ແລະໃຈ ບໍ່ວ່າໃນບ່ອນແຈ້ງຫຼືໃນບ່ອນລັບເລີຍ

[໑໐໔] ລືສີ ດ້ວຍການກ່າວຄຳສັດນີ້ ຂໍບຸດຈົ່ງເກີດເທີ້ນ
ເມື່ອຂ້ານ້ອຍກ່າວຕົວະ ຂໍຫົວຈົ່ງແຕກ ໗ ສ່ຽງ

[໑໐໕] ຂ້ານ້ອຍເປັນທີ່ຮັກທີ່ພໍພຣະຫະໄທຂອງພຣະພັດສະດາ
ພຣະມານດາຜູ້ເປັນແມ່ຜົວ ພຣະຣາດຊະບິດາຜູ້ເປັນພໍ່ຜົວ
ເປັນທີ່ຮັກຂອງຂ້ານ້ອຍ ທ່ານພາມ
ທ່ານທັງ ໔ ນັ້ນຊົງແນະນຳຂ້ານ້ອຍຢູ່ຈົນຕະຫຼອດພຣະຊົນມະຊີບ

[໑໐໖] ຂ້ານ້ອຍນັ້ນຍິນດີໃນການບໍ່ບຽດບຽນ
ມີປົກກະຕິປະພຶດທຳໂດຍສ່ວນດຽວ
ຕັ້ງໃຈມາບຳຣຸງທ່ານເຫຼົ່ານັ້ນໂດຍເຄົາລົບ
ບໍ່ໄດ້ຂີ້ຄ້ານທັງກາງຄືນແລະກາງເວັນ

[໑໐໗] ລືສີ ດ້ວຍການກ່າວຄຳສັດນີ້ ຂໍບຸດຈົ່ງເກີດເທີ້ນ
ເມື່ອຂ້ານ້ອຍກ່າວຕົວະ ຂໍຫົວຈົ່ງແຕກ ໗ ສ່ຽງ

[໑໐໘] ທ່ານພາມ ຂ້ານ້ອຍບໍ່ໄດ້ມີຄວາມຣິດສະຫຍາ
ຫຼືຄວາມໂກດໃນຍິງ ໑໖,໐໐໐ ນາງ
ຜູ້ເປັນພັນລະຍາຮ່ວມກັນເຫຼົ່ານັ້ນໃນການໃດ ໆ ເລີຍ

[໑໐໙] ຂ້ານ້ອຍຍິນດີທີ່ຈະເກື້ອກູນພວກນາງ
ບໍ່ມີຈັກນາງໜຶ່ງເລີຍເຊິ່ງເປັນທີ່ກຽດຊັງຂອງຂ້ານ້ອຍ
ຂ້ານ້ອຍຊ່ອຍເຫຼືອພວກນາງຜູ້ຮ່ວມສາມີກັນທຸກຄົນເປັນປະຈຳ
ເໝືອນຊ່ອຍເຫຼືອຕົນເອງ

[໑໑໐] ລືສີ ດ້ວຍການກ່າວຄຳສັດນີ້ ຂໍບຸດຈົ່ງເກີດເທີ້ນ
ເມື່ອຂ້ານ້ອຍກ່າວຕົວະ ຂໍຫົວຈົ່ງແຕກ ໗ ສ່ຽງ

[໑໑໑] ພວກທາດ ກຳມະກອນ ຄົນຮັບໃຊ້ ແລະຄົນທີ່ອາໄສລ້ຽງຊີບເຫຼົ່າອື່ນ
ຂ້ານ້ອຍມີຄວາມຍິນດີເບີກບານ ໃຊ້ສອຍດ້ວຍເຫດທີ່ເໝາະສົມສະເໝີ

[໑໑໒] ລີສີ ດ້ວຍການກ່າວຄຳສັດນີ້ ຂໍບຸດຈົ່ງເກີດເທີ້ນ
ເມື່ອຂ້ານ້ອຍກ່າວຕົວະ ຂໍຫົວຈົ່ງແຕກ ໆ ສ່ຽງ

[໑໑໓] ແມ່ນສະມະນະແລະພາມທັງຫຼາຍ ແລະແມ່ນພວກວະນິພົກເຫຼົ່າອື່ນ
ຂ້ານ້ອຍມີຝ່າມືອັນຊຸ່ມ ລ້ຽງດູໃຫ້ອີ່ມໜຳສຳຣານ
ດ້ວຍເຂົ້າແລະນ້ຳເປັນປະຈຳ

[໑໑໔] ລີສີ ດ້ວຍການກ່າວຄຳສັດນີ້ ຂໍບຸດຈົ່ງເກີດເທີ້ນ
ເມື່ອຂ້ານ້ອຍກ່າວຕົວະ ຂໍຫົວຈົ່ງແຕກ ໆ ສ່ຽງ

[໑໑໕] ຂ້ານ້ອຍເຂົ້າຈຳອຸໂປສົດປະກອບດ້ວຍອົງ ໘
ທຸກວັນ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳແຫ່ງປັກ
ພ້ອມທັງວັນປາຕິຫາຣິຍະປັກ
ສັງລວມແລ້ວໃນສິນທັງຫຼາຍໃນການທຸກເມື່ອ

[໑໑໖] ລີສີ ດ້ວຍການກ່າວຄຳສັດນີ້ ຂໍບຸດຈົ່ງເກີດເທີ້ນ
ເມື່ອຂ້ານ້ອຍກ່າວຕົວະ ຂໍຫົວຈົ່ງແຕກ ໆ ສ່ຽງ

(ທ້າວສັກກະຊົງສັນເສີນພຣະນາງສຸເມທາວ່າ)

[໑໑໗] ພຣະຣາດຊະບຸດຕີຜູ້ຈະເລີນ ຜູ້ພຽບພ້ອມດ້ວຍຍົດ
ຄຸນນະທຳທັງຫຼາຍທີ່ພຣະນາງຣະບຸເຖິງໃນພຣະອົງ
ມີຢູ່ໃນພຣະນາງທັງໝົດ

[໑໑໘] ກະສັດຜູ້ສົມບູນດ້ວຍພຣະຊາດ
ເປັນອະພິຊາຕະບຸດຜູ້ເຮືອງຍົດ ເປັນພຣະທຳຣາຊາແຫ່ງຊາວວິເທຫະ
ຈະອຸບັດແດ່ພຣະນາງ

(ພຣະນາງສຸເມທາຊົງໂສມະນັດ ຈຶ່ງຕັດຖາມວ່າ)

[໑໑໙] ພຣະດາບົດຜູ້ມີດວງຕາແຈ່ມໃສ ຄອງຜ້າເປື້ອນຝຸ່ນ
ຢືນຢູ່ໃນອາກາດທີ່ບໍ່ມີສິ່ງກີດຂວາງ
ກ່າວວາຈາເປັນທີ່ໜ້າຊື່ນໃຈ ຈັບໃຈຂ້ານ້ອຍຫຼາຍ

[໑໘໐] ທ່ານເປັນເທວະດາມາຈາກສະຫວັນແມ່ນບໍ?
ຫຼືວ່າເປັນລືສີຜູ້ມີລິດຫຼາຍ
ທ່ານເປັນໃຜກັນແທ້ມາຮອດບ່ອນນີ້
ຈົ່ງປະກາດຕົນໃຫ້ຂ້ານ້ອຍຮູ້

(ທ້າວສັກກະຕັດວ່າ)

[໑໘໑] ໝູ່ເທບມາປະຊຸມພ້ອມກັນທີ່ສະພາ
ຊື່ສຸທຳມາຖວາຍບັງຄົມທ່ານຜູ້ໃດ
ທ່ານຜູ້ນັ້ນຄືຂ້າພະເຈົ້າທ້າວສັກກະສະຫັດສະໄນ
ໄດ້ມາຍັງສຳນັກຂອງພຣະນາງ

[໑໘໒] ຍິງຄົນໃດໃນມະນຸດໂລກ
ປະພຶດທຳສະໝ່ຳສະເໝີ
ມີປັນຍາ ມີສິນ ມີຄວາມເຄົາລົບສາມີ
ນັບຖືແມ່ຜົວຄືດັ່ງເທວະດາ
[໑໘໓] ເທວະດາທັງຫຼາຍເຊິ່ງບໍ່ແມ່ນມະນຸດ
ຍ່ອມມາຢາມຍິງມະນຸດ
ຜູ້ມີປັນຍາດີມີວຽກງານອັນສະອາດເຊັ່ນນັ້ນ
[໑໘໔] ພຣະນາງຜູ້ຈະເລີນ ກໍພຣະນາງມີກຳອັນສັ່ງສົມໄວ້ດີແລ້ວ
ແລະມີການປະພຶດທີ່ດີງາມໄວ້ໃນປາງກ່ອນ
ຊົງເກີດໃນຣາດຊະສະກຸນນີ້
ເປັນຍິງທີ່ມີຄວາມສຳເລັດຕາມຄວາມປາຖະໜາທຸກສິ່ງທຸກຢ່າງ
[໑໘໕] ພຣະຣາດຊະບຸດຕີ
ກໍພຣະນາງຊົງກຳໄຊຊະນະນີ້ໄວ້ໄດ້ໃນໂລກທັງ ໒
ຄືຊົງເຂົ້າເຖິງເທວະໂລກ ໑
ມີກຽດຕິຍົດຊື່ສຽງໃນຊີວິດນີ້ ໑
[໑໘໖] ພຣະນາງສຸເມທາ ຂໍພຣະອົງຊົງສຸກສຳຣານ
ຮັກສາທຳໄວ້ໃນພຣະອົງຕະຫຼອດການລະນານເທີ້ນ
ເຮົານີ້ຂໍລາກັບໄປສູ່ສະຫວັນຊັ້ນໄຕຣທິດ
ການພົບພຣະນາງເປັນທີ່ພໍໃຈຂອງເຮົາ

**ສຸຣຸຈິຊາດົກທີ ໖ ຈົບ**

# ກ. ປັນຈຸໂປສະຖິກະຊາດົກ (໔໙໐)
## ວ່າດ້ວຍການຮັກສາອຸໂປສົດຂອງສັດ ໕ ຊະນິດ

(ພຣະໂພທິສັດຖາມນົກກາງແກວ່າ)

[໑໘໗] ເຈົ້ານົກກາງແກ ບັດນີ້ເຈົ້າເບິ່ງຄືມາຂວນຂວາຍໜ້ອຍລົງ
ເຈົ້າບໍ່ຕ້ອງການອາຫານບໍ
ເປັນຫຍັງຈຶ່ງອົດກັ້ນຄວາມຫິວກະຫາຍ
ຮັກສາອຸໂປສົດຢູ່ບໍ ເຈົ້ານົກກາງແກ

(ນົກກາງແກກ່າວວ່າ)

[໑໘໘] ເມື່ອກ່ອນຂ້າພະເຈົ້າຕົກຢູ່ໃນຄວາມກຳໜັດຕໍ່ນາງນົກກາງແກ
ເຮົາທັງ ໒ ຮື່ນຣົມກັນຢູ່ໃນພູມີປະເທດນັ້ນ ໆ
ຕໍ່ມານົກແຫຼວໄດ້ບິນຫຍຸມເອົານາງນົກກາງແກໄປ
ຂ້າພະເຈົ້າບໍ່ໄດ້ປະສົງຈະພັດພາກຈາກນາງເລີຍ

[໑໘໙] ຍ້ອນຄວາມພັດພາກແຍກອອກຈາກນາງ
ຂ້າພະເຈົ້າຈຶ່ງໄດ້ສະເຫວີຍເວທະນາທາງໃຈ
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງຮັກສາອຸໂປສົດດ້ວຍຄິດວ່າ
ຣາຄະຢ່າໄດ້ມາລົບກວນຂ້າພະເຈົ້າອີກຕໍ່ໄປ

(ພຣະໂພທິສັດຖາມສັດເທື່ອລະຕົວ ຝ່າຍສັດເຫຼົ່ານັ້ນກໍຕອບໄປຕາມຄວາມເປັນຈິງວ່າ)

[໑໙໐] ເຈົ້າງູຜູ້ເປັນສັດເລືອຄານ ຜູ້ມີລີ້ນສອງແສກ ເຈົ້າເລືອບໍ່ກົງ
ເລືອໄປດ້ວຍເອິກ ມີແຂ້ວເປັນອາວຸດ ມີພິດຮ້າຍແຮງ
ເປັນຫຍັງເຈົ້າຈຶ່ງອົດກັ້ນຄວາມຫິວກະຫາຍຮັກສາອຸໂປສົດຢູ່ແນວນີ້ບໍ

[໑໙໑] ງົວປ່ຽວມີກຳລັງຂອງນາຍບ້ານ
ມີໜອກສະເນືອນ ມີສີສັນສວຍງາມ
ມີກຳລັງວັງຊາສົມບູນ ມັນຢຽບຂ້າພະເຈົ້າ
ຂ້າພະເຈົ້າໂກດຈຶ່ງໄດ້ກັດມັນ
ມັນທຸຣົນທຸຣາຍຍ້ອນຄວາມທຸກຈົນເຖິງຕາຍ

[໑໙໒] ຊົນທັງຫຼາຍອອກຈາກໝູ່ບ້ານນັ້ນ

ພາກັນຄ່ຳຄວນຮ້ອງໄຫ້ແລ້ວໄດ້ຫຼີກໄປ
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງຮັກສາອຸໂປສົດດ້ວຍຄິດວ່າ
ຄວາມໂກດຢ່າໄດ້ມາລົບກວນຂ້າພະເຈົ້າອີກຕໍ່ໄປ

[໑໓໓] ເຈົ້າໝາຈອກ ຊີ້ນຂອງພວກສັດທີ່ຕາຍແລ້ວ
ມີຢູ່ໃນປ່າຊ້າເປັນຈຳນວນຫຼາຍ
ຊີ້ນນັ້ນເປັນອາຫານທີ່ພໍໃຈຂອງເຈົ້າ
ເປັນຫຍັງເຈົ້າຈຶ່ງອົດກັ້ນຄວາມຫິວກະຫາຍຮັກສາອຸໂປສົດຢູ່ນໍ

[໑໓໔] ຂ້າພະເຈົ້າຍິນດີໃນຊາກສົບ ຕິດໃຈໃນຊີ້ນຊ້າງ
ຈຶ່ງໄດ້ເຂົ້າໄປສູ່ທ້ອງຊ້າງໃຫຍ່
ລົມຮ້ອນແລະແສງແດດອັນແຮງກ້າໄດ້ແຜດເຜົາ
ຈົນວ່າທະວານໜັກຂອງຊ້າງເຊືອກນັ້ນແຫ້ງຢຸບລົງ

[໑໓໕] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້າພະເຈົ້າທັງຜອມທັງເຫຼືອງ ທັງບໍ່ມີທາງອອກ
ຕໍ່ມາເມກຝົນກຸ່ມໃຫຍ່ໄດ້ຕົກມາໂດຍທັນທີ
ເຮັດໃຫ້ທະວານໜັກຂອງຊ້າງເຊືອກນັ້ນປຽກຊຸ່ມ

[໑໓໖] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້າພະເຈົ້າອອກຈາກທ້ອງຊ້າງນັ້ນມາໄດ້
ເໝືອນດັ່ງດວງຈັນພົ້ນຈາກປາກຣາຫູ
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງຮັກສາອຸໂປສົດດ້ວຍຄິດວ່າ
ຄວາມໂລບຢ່າໄດ້ມາລົບກວນຂ້າພະເຈົ້າອີກຕໍ່ໄປ

[໑໓໗] ເຈົ້າໝີ ເມື່ອກ່ອນເຈົ້າຫ່ຽວຫຍ້ຳກິນປວກທັງຫຼາຍ
ທີ່ຈູມປວກຢູ່ ເປັນຫຍັງເຈົ້າຈຶ່ງອົດກັ້ນຄວາມຫິວກະຫາຍ
ແລ້ວມາຮັກສາອຸໂປສົດຢູ່ນໍ?

[໑໓໘] ຂ້າພະເຈົ້າດູໝິ່ນບ່ອນຢູ່ຂອງຕົນ ໄດ້ໄປສູ່ໝູ່ບ້ານມະນະຣັດ
ຍ້ອນຄວາມຢາກເກີນໄປ ຊົນທັງຫຼາຍອອກຈາກໝູ່ບ້ານນັ້ນ
ທຸບຕີຂ້າພະເຈົ້າດ້ວຍຄັນທະນູແລະໄມ້ຄ້ອນ

[໑໓໙] ຂ້າພະເຈົ້ານັ້ນຫົວແຕກ ຕົວເປື້ອນເລືອດ ຈຶ່ງໄດ້ກັບມາຍັງບ່ອນຢູ່ຂອງຕົນ
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງຮັກສາອຸໂປສົດດ້ວຍຄິດວ່າ
ຄວາມຢາກເກີນໄປຢ່າໄດ້ມາລົບກວນຂ້າພະເຈົ້າອີກຕໍ່ໄປ

(ສັດທັງ ໔ ຖາມພຣະໂພທິສັດວ່າ)

[໑໔໐] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂໍ້ຄວາມອັນໃດທ່ານໄດ້ຖາມພວກຂ້າພະເຈົ້າ
ຂໍ້ຄວາມອັນນັ້ນ ຂ້າພະເຈົ້າທັງໝົດກໍໄດ້ຕອບຕາມທີ່ຮູ້ມາ
ພວກຂ້າພະເຈົ້າຈະຂໍຖາມທ່ານແດ່
ທ່ານພາມຜູ້ຈະເລີນ ເປັນຫຍັງທ່ານຈຶ່ງຮັກສາອຸໂປສົດຢູ່ນໍ

(ພຣະໂພທິສັດໄດ້ຕອບວ່າ)

[໑໔໑] ພຣະປັດເຈກພຸດທະເຈົ້າຜູ້ບໍ່ຖືກກິເລດທັງປວງແປດເປື້ອນ
ນັ່ງຢູ່ເທິງອາສົນຂອງເຮົາ
ທ່ານໄດ້ປະກາດໃຫ້ເຮົາຮູ້ເຖິງທີ່ໄປທີ່ມາ
ຊື່ ໂຄດ ແລະຄວາມປະພຶດທຸກຢ່າງ

[໑໔໒] ແມ່ນເຖິງແນວນັ້ນ ເຮົາກໍບໍ່ໄດ້ໄຫວ້ຕີນທັງ ໒ ຂອງທ່ານ
ແລະບໍ່ໄດ້ຖາມທ່ານ ຍ້ອນມີມານະ
ຍ້ອນເຫດນັ້ນ ເຮົາຈຶ່ງຮັກສາອຸໂປສົດດ້ວຍຄິດວ່າ
ມານະຢ່າໄດ້ມາລົບກວນເຮົາອີກຕໍ່ໄປ

**ປັນຈຸໂປສະຖິກະຊາດົກທີ ໗ ຈົບ**

## ๘. ມະຫາໂມຣະຊາດົກ (໔໙໑)
## ວ່າດ້ວຍພະຍານົກຍູງ

(ພະຍານົກຍູງຮ້ອງຂໍຊີວິດວ່າ)

[໑໔໓] ຖ້າຫາກທ່ານຈັບຂ້າພະເຈົ້າຍ້ອນເຫດແຫ່ງຊັບ
ທ່ານຢ່າໄດ້ຂ້າຂ້າພະເຈົ້າເລີຍ
ຈົ່ງຈັບເປັນແລ້ວນຳຂ້າພະເຈົ້າໄປສູ່ສຳນັກພຣະຣາຊາເທີ້ນເພື່ອນ
ທ່ານຄົງຈະໄດ້ຊັບບໍ່ແມ່ນໜ້ອຍ

(ບຸດນາຍພານປອບວ່າ)

[໑໔໔] ລູກທະນູທີ່ສອດຢູ່ໃນແລ່ງນີ້
ຂ້າພະເຈົ້າຕັ້ງໃຈຈະຂ້າທ່ານໃນວັນນີ້ກໍບໍ່ແມ່ນ

ແຕ່ຈະຕັດບ້ວງໃຫ້ແກ່ທ່ານ ດ້ວຍມີຄວາມປະສົງວ່າ
ຂໍພະຍາຍູງທອງຈົ່ງບິນໄປຕາມປາຖະໜາເທີ້ນ

(ພະຍານົກຍູງກ່າວວ່າ)

[໑໔໕] ຂ້າພະເຈົ້າຂໍຖາມທ່ານ ຍ້ອນເຫດທີ່ທ່ານ
ສູ້ອົດກັ້ນຄວາມຫິວກະຫາຍຕະຫຼອດທັງຄືນທັງວັນ
ເຝົ້າຕິດຕາມຂ້າພະເຈົ້າຢູ່ຕະຫຼອດ ໗ ປີ
ເມື່ອເປັນເຊັ່ນນັ້ນ ຍ້ອນເຫດອັນໃດ ທ່ານຈຶ່ງປະສົງຈະປ່ອຍຂ້າພະເຈົ້າ
ຜູ້ຕິດບ້ວງໃຫ້ພົ້ນຈາກເຄື່ອງຜູກມັດ

[໑໔໖] ວັນນີ້ ທ່ານຕັ້ງໃຈງົດເວັ້ນຈາກປານາຕິບາດແມ່ນບໍ?
ຫຼືວ່າທ່ານໃຫ້ອະໄພແກ່ສັດທັງປວງແລ້ວ
ຍ້ອນເຫດໃດ ທ່ານຈຶ່ງປະສົງຈະປ່ອຍຂ້າພະເຈົ້າຜູ້ຕິດບ້ວງ
ໃຫ້ພົ້ນຈາກເຄື່ອງຜູກນີ້ນໍ?

(ບຸດນາຍພານຖາມວ່າ)

[໑໔໗] ພະຍານົກຍູງ ຂໍທ່ານຈົ່ງບອກເຖິງຜົນ
ຂອງບຸກຄົນຜູ້ງົດເວັ້ນຈາກປານາຕິບາດແລະໃຫ້ອະໄພໝູ່ສັດທັງປວງ
ຄວາມຂໍ້ນີ້ທີ່ຂ້າພະເຈົ້າຖາມທ່ານ
ເຂົາຈຸຕິຈາກໂລກນີ້ໄປແລ້ວຈະໄດ້ຮັບຄວາມສຸກແນວໃດ

(ພະຍານົກຍູງຕອບວ່າ)

[໑໔໘] ຂ້າພະເຈົ້າຂໍບອກຜົນຂອງບຸກຄົນຜູ້ງົດເວັ້ນຈາກປານາຕິບາດ
ແລະຜູ້ໃຫ້ອະໄພໝູ່ສັດທັງປວງວ່າ
ເຂົາຍ່ອມໄດ້ຮັບການສັນເສີນໃນປັດຈຸບັນ
ແລະເມື່ອຕາຍຍ່ອມໄປສູ່ສະຫວັນ

(ບຸດນາຍພານກ່າວວ່າ)

[໑໔໙] ສະມະນະແລະພາມພວກໜຶ່ງກ່າວວ່າ ເທວະດາບໍ່ມີ
ຊີວະຍ່ອມເຖິງຄວາມຂາດສູນໃນພົບນີ້ທີ່ນັ້ນ
ຜົນຂອງກຳດີກຳຊົ່ວກໍຄືກັນ ຍ່ອມຂາດສູນ

ແລະກ່າວສອນວ່າ ທານຄົນໂງ່ບັນຍັດໄວ້
ຂ້າພະເຈົ້າເຊື່ອວາຈາຂອງພຣະອະຣະຫັນເຫຼົ່ານັ້ນ
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງບຽດບຽນນິກາຍທັງຫຼາຍ

(ພຣະໂພທິສັດກ່າວວ່າ)

[໑໕໐] ດວງຈັນແລະດວງອາທິດທັງ ໔ ເຫັນໄດ້ຊັດເຈນ
ສ່ອງໂລກໃຫ້ສະຫວ່າງສະໄຫວ ໂຄຈອນໄປໃນອາກາດ
ດວງຈັນແລະດວງອາທິດທັງ ໔ ນັ້ນມີຢູ່ໃນໂລກນີ້ຫຼືໂລກອື່ນ
ໃນມະນຸດໂລກ ພວກເຂົາກ່າວເຖິງດວງຈັນ
ແລະດວງອາທິດທັງ ໔ ນັ້ນແນວໃດນໍ

(ບຸດນາຍພານກ່າວວ່າ)

[໑໕໑] ດວງຈັນແລະດວງອາທິດທັງ ໔ ເຫັນໄດ້ຊັດເຈນ
ສ່ອງໂລກໃຫ້ສະຫວ່າງສະໄຫວ ໂຄຈອນໄປໃນອາກາດ
ດວງຈັນແລະດວງອາທິດທັງ ໔ ນັ້ນມີຢູ່ໃນໂລກອື່ນ ບໍ່ແມ່ນໂລກນີ້
ໃນມະນຸດໂລກ ພວກເຂົາກ່າວເຖິງດວງຈັນແລະດວງອາທິດ
ທັງ ໔ ນັ້ນວ່າ ເທວະດາ

(ຕໍ່ມາພຣະໂພທິສັດໄດ້ກ່າວກັບເຂົາວ່າ)

[໑໕໔] ສະມະນະແລະພາມເຫຼົ່າໃດເປັນອະເຫຕຸກະທິດຖິ ບໍ່ເວົ້າເຖິງກຳ
ບໍ່ເວົ້າເຖິງຜົນຂອງກຳດີກຳຊົ່ວດ້ວຍຄືກັນ
ແຕ່ສອນວ່າ ທານຄົນໂງ່ບັນຍັດໄວ້
ສະມະນະແລະພາມເຫຼົ່ານັ້ນຜູ້ມີທິດຖິຊົ່ວຊາມ
ຖືກກຳຈັດແລ້ວຍ້ອນການພະຍາກອນພຽງເທົ່ານີ້

(ບຸດນາຍພານກຳນົດໄດ້ແລ້ວຈຶ່ງກ່າວວ່າ)

[໑໕໖] ຄຳຂອງທ່ານນັ້ນເປັນຄຳສັດຢ່າງແທ້ຈິງ
ທານຈະບໍ່ເພິ່ງມີຜົນໄດ້ແນວໃດ
ກຳດີກຳຊົ່ວກໍຄືກັນ ຈະບໍ່ເພິ່ງມີຜົນໄດ້ແນວໃດ
ແລະທານຄົນໂງ່ຈະເພິ່ງບັນຍັດຂຶ້ນໄດ້ແນວໃດ

[໑໕໔] ພະຍານົກຍູງ ຂ້າພະເຈົ້າເຮັດກຳແນວໃດ ເຮັດຍ້ອນອັນໃດ
ປະພຶດແນວໃດ ຈະຄົບໃຜ ຜູ້ມີຕະບະຄຸນແນວໃດ
ຂໍທ່ານຈົ່ງບອກເນື້ອຄວາມນັ້ນແກ່ຂ້າພະເຈົ້າ
ໂດຍທີ່ຂ້າພະເຈົ້າຈະບໍ່ຕ້ອງຕົກນະຮົກ

(ພຣະໂພທິສັດກ່າວວ່າ)

[໑໕໕] ເທິງພື້ນແຜ່ນດິນຍັງມີສະມະນະພວກໃດພວກໜຶ່ງຢູ່
ສະມະນະເຫຼົ່ານັ້ນນຸ່ງຫົ່ມຜ້າກາສາວະພັດ ເປັນບັນພະຊິດ
ທ່ຽວບິນທະບາດສະເພາະເວລາເຊົ້າ
ງົດເວັ້ນການບໍຣິໂພກໃນເວລາວິການ ເປັນສັດຕະບຸຣຸດ

[໑໕໖] ທ່ານຈົ່ງເຂົ້າໄປຫາສະມະນະເຫຼົ່ານັ້ນຕາມການອັນສົມຄວນ
ແລ້ວຈົ່ງຖາມຂໍ້ຄວາມຕາມທີ່ທ່ານພໍໃຈ
ສະມະນະເຫຼົ່ານັ້ນຈະຊີ້ແຈ່ງຂໍ້ຄວາມອັນເປັນປະໂຫຍດ
ທັງໃນໂລກນີ້ແລະໂລກໜ້າແກ່ທ່ານຕາມທີ່ຮູ້ມາ

(ພຣະປັດເຈກພຸດທະເຈົ້າເປ່ງອຸທານວ່າ)

[໑໕໗] ຄວາມເປັນພານນີ້ຂ້າພະເຈົ້າລະໄດ້ແລ້ວ
ເໝືອນງູລອກຄາບເກົ່າແກ່ຖິ້ມໄປ
ເໝືອນຕົ້ນໄມ້ສະລັດໃບເຫຼືອງຖິ້ມ ຂຽວຊະອຸ່ມຢູ່
ຂ້າພະເຈົ້າລະຖິ້ມຄວາມເປັນພານໄດ້ໃນວັນນີ້

(ທ່ານເຮັດສັດຈະກິຣິຍາວ່າ)

[໑໕໘] ນົກເຫຼົ່າໃດທີ່ຂ້າພະເຈົ້າກັກຂັງໄວ້ຫຼາຍຮ້ອຍຕົວໃນເຮືອນຂອງຂ້າພະເຈົ້າ
ວັນນີ້ ຂ້າພະເຈົ້າໃຫ້ທານຊີວິດແກ່ນົກເຫຼົ່ານັ້ນ
ຂໍໃຫ້ນົກເຫຼົ່ານັ້ນຈົ່ງຫຼຸດພົ້ນ
ກັບໄປສູ່ບ່ອນຢູ່ຂອງຕົນເທີ້ນ

(ພຣະສາດສະດາເມື່ອຈະຊົງປະກາດວ່າ ນົກເຫຼົ່ານັ້ນພົ້ນຈາກທຸກໄດ້ຍ້ອນອາໄສພະຍານົກຍູງ ຈຶ່ງ ຕັດພຣະຄາຖາສຸດທ້າຍວ່າ)

[໑໕໙] ນາຍພານຖືບ້ວງທ່ຽວໄປໃນປ່າ

ເພື່ອຈະຈັບພະຍານິກຍູງຄຳຜູ້ເຮືອງຍົດ
ເມື່ອຈັບພະຍານິກຍູງຄຳຜູ້ເຮືອງຍົດໄດ້ແລ້ວ
ເຂົາໄດ້ພົ້ນຈາກທຸກເໝືອນເຮົາຕະຖາຄົດໄດ້ພົ້ນແລ້ວ

**ມະຫາໂມຣະຊາດົກທີ ໗ ຈົບ**

## ໘. ຕັດສະສູກະຣະຊາດົກ (໔໙໘)
## ວ່າດ້ວຍໝູຊື່ຕັດສະ

(ໝູຕັດສະທ່ຽວເສາະຫາຝູງໝູໃນປ່າພົບໝູຈຳນວນຫຼາຍແລ້ວດີໃຈ ຈຶ່ງກ່າວວ່າ)

[໑໖໐] ເຮົາເມື່ອເສາະຫາໝູ່ຍາດໃດ
ທ່ຽວໄປຕາມພູເຂົາລຳເນົາໄພ
ເຮົາທ່ຽວຕາມຫາຢູ່ດົນນານ
ຍາດທັງຫຼາຍນັ້ນເຮົາກໍໄດ້ພົບແລ້ວ

[໑໖໑] ມູນຜະລາຫານນີ້ກໍມີຢູ່ຫຼາຍ ແລະພັກສາຫານນີ້ກໍມີຢູ່ບໍ່ໜ້ອຍ
ສ່ວນແມ່ນ້ຳ ພູເຂົານີ້ກໍໜ້າອອນຊອນ ຄົງຈະຢູ່ໄດ້ສະບາຍ

[໑໖໒] ເຮົາຈັກຢູ່ພ້ອມກັບໝູ່ຍາດທັງປວງໃນບ່ອນນີ້ແລ
ຈັກເປັນຜູ້ຂວນຂວາຍໜ້ອຍ ໝົດຄວາມຣະແວງໄພ
ບໍ່ມີຄວາມເສົ້າໂສກ ບໍ່ມີໄພແຕ່ບ່ອນໃດ

(ໝູທັງຫຼາຍກ່າວວ່າ)

[໑໖໓] ຕັດສະ ທ່ານຈົ່ງເສາະຫາຖ້ຳໃນບ່ອນອື່ນຢູ່ເທີ້ນ
ໃນບ່ອນນີ້ພວກເຮົາມີສັດຕູ
ມັນມາໃນບ່ອນນີ້ແລ້ວຂ້າໝູກັດກິນຊີ້ນເປັນປະຈຳ

(ໝູຕັດສະຖາມວ່າ)

[໑໖໔] ໃຜນໍເປັນສັດຕູຂອງພວກເຮົາໃນບ່ອນນີ້
ໃຜກັນລັງຄວານໝູ່ຍາດຜູ້ພ້ອມພຽງເຊິ່ງລັງຄວານໄດ້ຍາກ
ເຮົາຖາມແລ້ວ ຂໍພວກທ່ານຈົ່ງບອກຜູ້ນັ້ນແກ່ເຮົາ

(ໝູເຫຼົ່ານັ້ນຕອບວ່າ)

[໑໖໕] ທ່ານຕັດສະ ພະຍາເນື້ອ
ເປັນສັດມີກຳລັງ ມີແຂ້ວເປັນອາວຸດ
ມັນມາບ່ອນນີ້ຂ້າໝູແລ້ວກັດກິນຊີ້ນເປັນປະຈຳ

(ໝູຕັດສະກ່າວວ່າ)

[໑໖໖] ພວກເຮົາບໍ່ມີແຂ້ວກໍຫາບໍ່ໄດ້ ກຳລັງກາຍກໍມີພ້ອມ
ພວກເຮົາທັງໝົດຈິ່ງພ້ອມພຽງກັນ ລວມກຳລັງກັນ

(ໝູເຫຼົ່ານັ້ນກ່າວວ່າ)

[໑໖໗] ທ່ານຕັດສະ ທ່ານເວົ້າໄດ້ຖືກຕ້ອງ
ແລະກ້າຫານເຮົາຕ້ອງສູ້
ຖ້າຈັ່ງຊັ້ນຖ້າມີໂຕໃດໜີໄປໃນຂະນະຕໍ່ສູ້
ພວກເຮົາຈະຂ້າໂຕນັ້ນໃນພາຍຫຼັງ

(ຊະດິນໂກງເຫັນເສືອໂຄ່ງກັບມາມືເປົ່າ ຈິ່ງກ່າວວ່າ)

[໑໖໘] ວັນນີ້ທ່ານງົດເວັ້ນຈາກປານາຕິບາດຢູ່ແມ່ນບໍ?
ຫຼືວ່າທ່ານໃຫ້ອະໄພແກ່ໝູ່ສັດທັງປວງ
ທ່ານບໍ່ມີແຮງຈະຂ້າກັດກິນໝູແລ້ວບໍ?
ຂະໜາດຢູ່ໃນຝູງໝູແທ້ ໆ
ກໍຍັງຊຶບເຊົາເຫງົາຫງອຍຢູ່ເໝືອນຄົນກຳພ້າ

(ພະຍາເສືອໂຄ່ງໄດ້ກ່າວວ່າ)

[໑໖໙] ຂ້າພະເຈົ້າຈະບໍ່ມີແຮງກໍຫາບໍ່ໄດ້
ແຕ່ຍ້ອນເຫັນຍາດ ໆ ຂອງໝູໄດ້ພ້ອມພຽງເປັນອັນດຽວກັນ
ຍ້ອນເຫດນັ້ນ ຂ້າພະເຈົ້າຈິ່ງຊຶບເຊົາເຫງົາຫງອຍຢູ່ບໍ່ກ້າເຮັດຫຍັງ

[໑໗໐] ເມື່ອກ່ອນໝູເຫຼົ່ານີ້ຢ້ານຂ້າພະເຈົ້າ
ເມື່ອເຫັນຂ້າພະເຈົ້າຕ່າງກໍພາກັນແຍກໜີຕາຍ
ໄປຄົນລະທິດລະທາງ
ແຕ່ບັດນີ້ພວກມັນກັບລວມໝູ່ກັນຕັ້ງທ່າສູ້
ຍາກທີ່ຂ້າພະເຈົ້າຈະຂົ່ມເຫງພວກມັນໄດ້

[໑໗໑] ພວກມັນໄດ້ຜູ້ນຳດີ ມີຄວາມພ້ອມພຽງກັນ
ມີຄວາມເຫັນຢ່າງດຽວກັນ ພ້ອມກັນທີ່ຈະທຳລາຍຂ້າພະເຈົ້າໄດ້
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງບໍ່ກ້າເຮັດຫຍັງໝູເຫຼົ່ານັ້ນ

(ຊະດີນໂກງເມື່ອຈະໃຫ້ເສືອໂຄ່ງເກີດຄວາມອຸດສາຫະ ຈຶ່ງກ່າວວ່າ)

[໑໗໒] ພຣະອິນອົງດຽວຍັງເອົາຊະນະພວກອະສູນໄດ້
ນົກແຫຼວຕົວດຽວຍັງຂົ່ມຂີ່ຂ້ານົກທັງຫຼາຍໄດ້
ເສືອໂຄ່ງຕົວດຽວເຂົ້າໄປຢູ່ໃນຝູງເນື້ອ
ກໍຍັງຂ້າເນື້ອຕົວໃຫຍ່ ເຊິ່ງມີກຳລັງພໍ ໆ ກັນໄດ້

(ເສືອໂຄ່ງກ່າວວ່າ)

[໑໗໓] ໝູ່ຍາດຜູ້ພ້ອມພຽງຮ່ວມໃຈກັນ
ມີຄວາມກ້າຫານພໍ ໆ ກັນກັບເສືອໂຄ່ງ
ບໍ່ວ່າພຣະອິນຫຼືນົກແຫຼວ
ຫຼືເສືອໂຄ່ງ ເຊິ່ງເປັນພະຍາສັດ
ກໍບໍ່ສາມາດເຮັດໃຫ້ຢູ່ໃນອຳນາດໄດ້

(ຊະດີນໂກງປຸກໃຈເສືອໂຄ່ງອີກວ່າ)

[໑໗໔] ຝູງນົກກຸມພີລະກາຕົວນ້ອຍ ໆ
ທ່ຽວໄປເປັນຝູງ ເປັນໝູ່
ຮື່ນເຣີງຈັບກຸ່ມກັນໂຜບິນໄປມາ

[໑໗໕] ກໍເມື່ອນົກເຫຼົ່ານັ້ນໂຜບິນຢູ່
ແຫຼວຍັງສາມາດຫຍຸມເອົານົກຕົວໃດຕົວໜຶ່ງ
ທີ່ບິນອອກມາຈາກຝູງໄດ້

(ພຣະສາດສະດາຊົງປະກາດຂໍ້ຄວາມນັ້ນວ່າ)

[໑໗໖] ເສືອໂຄ່ງມີແຂ້ວເປັນອາວຸດ
ຖືກຊະດີນຊົ່ວຜູ້ເຫັນແກ່ອາມິດປຸກໃຈ
ມີຄວາມສຳຄັນເໝືອນຄັ້ງກ່ອນ
ຈຶ່ງໄດ້ແລ່ນເຂົ້າໄປຢູ່ໃນຝູງຂອງໝູຜູ້ສາມັກຄີກັນ

(ຣຸກຂະເທວະດາເຫັນເຫດອັດສະຈັນນັ້ນ ຈຶ່ງກ່າວຄາຖາວ່າ)

[໑໗໗] ຍາດທັງຫຼາຍມີຫຼາຍເປັນການດີ
ເຖິງແມ່ນຈະເປັນຕົ້ນໄມ້ທີ່ເກີດໃນປ່າກໍຕາມ
ເສືອໂຄ່ງຖືກໝູທັງຫຼາຍທີ່ສາມັກຄີກັນຂ້າຕາຍ
ໃນຫົນທາງທີ່ຍ່າງໄດ້ຄົນດຽວ

(ພຣະສາດສະດາຕັດວ່າ)

[໑໗໘] ໝູທັງຫຼາຍໄດ້ພາກັນຂ້າທັງ
ພາມ ໑ ເສືອໂຄ່ງ ໑
ຈຶ່ງໄດ້ຣື່ນເຣີງບັນເທີງໃຈ ສົ່ງສຽງຮ້ອງດັງກ້ອງປ່າ

[໑໗໙] ໝູເຫຼົ່ານັ້ນມາປະຊຸມພ້ອມກັນຢູ່ເຫງົ້າຕົ້ນໝາກເດື່ອ
ໄດ້ອະພິເສກໝູຕັດສະວ່າ
ທ່ານຈົ່ງເປັນຣາຊາ ເປັນໃຫຍ່ແຫ່ງເຮົາທັງຫຼາຍເທີ້ນ

**ຕັດສະສູກະຣະຊາດົກທີ ໙ ຈົບ**

## ໑໐. ມະຫາວານິຊະຊາດົກ (໔໙໓)
## ວ່າດ້ວຍພໍ່ຄ້າໃຫຍ່

(ພຣະສາດສະດາຊົງນຳອະດີດນິທານມາຕັດວ່າ)

[໑໘໐] ພໍ່ຄ້າທັງຫຼາຍຈາກແຄວ້ນຕ່າງ ໆ
ມາປະຊຸມກັນທີ່ເມືອງພາຣານະສີ
ຕັ້ງພໍ່ຄ້າທີ່ມີປັນຍາດີກວ່າຄົນໜຶ່ງໃຫ້ເປັນຫົວໜ້າ
ພາກັນນຳຊັບກັບ

[໑໘໑] ພໍ່ຄ້າເຫຼົ່ານັ້ນມາເຖິງຖິ່ນກັນດານທີ່ມີພັກສາໜ້ອຍ ບໍ່ມີນ້ຳ
ໄດ້ພົບຕົ້ນໄຮໃຫຍ່ ມີຮົ່ມເງົາເຢັນສະບາຍ ໜ້າອອນຊອນ

[໑໘໔] ກໍພໍ່ຄ້າເຫຼົ່ານັ້ນພາກັນນັ່ງທີ່ຮົ່ມເງົາຕົ້ນໄຮນັ້ນນັ້ນເອງ
ພວກທີ່ເປັນຄົນໂງ່ຖືກໂມຫະຄອບງຳ ຄິດເຫັນພ້ອມກັນວ່າ

[໑໘໓] ຕົ້ນໄມ້ຕົ້ນນີ້ເຢັນສົດຊື່ນ ຄືກັບມີນ້ຳຊຶມຢູ່

ຂໍເຊີນພວກເຮົາເຫຼົ່າພໍ່ຄ້າພາກັນຕັດງ່າດ້ານຕາເວັນອອກເທີ້ນ

[໑໗໔] ກໍງ່າໄມ້ນັ້ນພໍຖືກຕັດແລ້ວກໍຈະຫຼັ່ງນ້ຳໃສ ບໍ່ຂຸ່ນອອກມາ
ພໍ່ຄ້າເຫຼົ່ານັ້ນພາກັນອາບແລະດື່ມກິນຕາມທີ່ຕ້ອງການຢູ່ກົກໄມ້ນັ້ນ

[໑໗໕] ຄັ້ງທີ ໔ ພວກທີ່ເປັນຄົນໂງ່ຖືກໂມຫະຄອບງຳ ຄິດເຫັນພ້ອມກັນວ່າ
ຂໍເຊີນພວກເຮົາເຫຼົ່າພໍ່ຄ້າພາກັນຕັດງ່າທາງທິດໃຕ້ເທີ້ນ

[໑໗໖] ກໍງ່າໄມ້ນັ້ນພໍຖືກຕັດແລ້ວກໍຫຼັ່ງເຂົ້າສາລີ ຊີ້ນ ເຂົ້າສຸກ
ເຂົ້າໜົມກຸມມາດເຊິ່ງມີສີເໝືອນເຂົ້າປາຍາດທີ່ມີນ້ຳໜ້ອຍ
ແກງອ່ອມ ແລະກັບມີແກງຖົ່ວເປັນຕົ້ນອອກມາຫຼາຍ

[໑໗໗] ພວກພໍ່ຄ້າເຫຼົ່ານັ້ນພາກັນບໍຣິໂພກ
ຫຍໍ້າກິນຕາມທີ່ຕ້ອງການທີ່ງ່າໄມ້ນັ້ນ
ຄັ້ງທີ ໖ ພວກທີ່ເປັນຄົນໂງ່ຖືກໂມຫະຄອບງຳ
ຄິດເຫັນພ້ອມກັນວ່າ ຂໍເຊີນພວກເຮົາເຫຼົ່າພໍ່ຄ້າ
ພາກັນຕັດງ່າດ້ານທິດຕາເວັນຕົກເທີ້ນ

[໑໗໘] ກໍງ່າໄມ້ນັ້ນພໍຖືກຕັດແລ້ວ
ກໍຫຼັ່ງໄຫຼເຫຼົ່ານາຣີມີເຄື່ອງປະດັບພ້ອມມູນ
ເສື້ອຜ້າອາພອນງາມວິຈິດ ໃສ່ຕຸ້ມຫູແກ້ວມະນີອອກມາ

[໑໗໙] ກໍພໍ່ຄ້າແຕ່ລະຄົນມີນາຣີນາງໜຶ່ງ
ສ່ວນຫົວໜ້າກອງກວຽນມີນາຣີ ໒໕ ນາງ
ແວດລ້ອມຢູ່ຮອບຂ້າງທີ່ຮົ່ມເງົາຕົ້ນໄຮນັ້ນ

[໑໘໐] ພວກພໍ່ຄ້າເຫຼົ່ານັ້ນມີເຫຼົ່ານາຣີແວດລ້ອມຕາມທີ່ຕ້ອງການ
ຄັ້ງທີ ໔ ພວກທີ່ເປັນຄົນໂງ່ຖືກໂມຫະຄອບງຳ ຄິດເຫັນພ້ອມກັນວ່າ
ຂໍເຊີນພວກເຮົາເຫຼົ່າພໍ່ຄ້າພາກັນຕັດງ່າດ້ານທິດເໜືອເທີ້ນ

[໑໘໑] ກໍງ່າໄມ້ນັ້ນພໍຖືກຕັດແລ້ວ ກໍຫຼັ່ງແກ້ວມຸກດາ ແກ້ວໄພທູນ
ເງິນ ຄຳ ເຄື່ອງປູລາດຫຼັງຊ້າງ ແລະເຄື່ອງປູລາດທີ່ເຮັດດ້ວຍຂົນແກະ

[໑໘໒] ຜ້າແຄວ້ນກາສີ ແລະຜ້າກຳພົນຊື່ອຸດທິຍະອອກມາເປັນຈຳນວນຫຼາຍ
ພວກພໍ່ຄ້າເຫຼົ່ານັ້ນພາກັນຂົນບັນທຸກກວຽນເຫຼົ່ານັ້ນຕາມທີ່ຕ້ອງການ

[໑໙໓]	ຄັ້ງທີ ໕ ພວກທີ່ເປັນຄົນໂງ່ຖືກໂມຫະຄອບງຳ ຄິດເຫັນພ້ອມກັນວ່າ
ຂໍເຊີນພວກເຮົາຊ່ວຍກັນຕັດເຫງົ້າຕົ້ນໄຮນັ້ນເທີ້ນ ບາງເທື່ອຈະໄດ້ຍິ່ງກວ່ານີ້

[໑໙໔]	ທັນໃດນັ້ນ ຫົວໜ້າກອງກວຽນໄດ້ລຸກຂຶ້ນປະຄອງອັນຊະລີ
ຂໍຮ້ອງວ່າ ພໍ່ຄ້າວານິດທັງຫຼາຍ ຕົ້ນໄຮມີຄວາມຜິດອັນໃດບໍ?
ຂໍຄວາມຈະເລີນຈົ່ງມີແກ່ພວກທ່ານເທີ້ນ

[໑໙໕]	ງ່າດ້ານທິດຕາເວັນອອກໃຫ້ນ້ຳອາບ
ງ່າດ້ານທິດໃຕ້ໃຫ້ເຂົ້າແລະນ້ຳດື່ມ
ງ່າດ້ານທິດຕາເວັນຕົກໃຫ້ເຫຼົ່ານາຣີ
ສ່ວນງ່າດ້ານທິດເໜືອໃຫ້ຊັບທີ່ໜ້າພໍໃຈທຸກຢ່າງ
ພໍ່ຄ້າວານິດທັງຫຼາຍ ຕົ້ນໄຮມີຄວາມຜິດອັນໃດບໍ?
ຂໍຄວາມຈະເລີນຈົ່ງມີແກ່ພວກທ່ານເທີ້ນ

[໑໙໖]	ບຸກຄົນນັ່ງກໍຕາມ ນອນກໍຕາມທີ່ຮົ່ມເງົາຕົ້ນໄມ້ໃດ
ບໍ່ຄວນຫັກຮານງ່າຕົ້ນໄມ້ນັ້ນ
ຍ້ອນວ່າຄົນປະທຸດສະຮ້າຍມິດເປັນຄົນຊົ່ວ

[໑໙໗]	ແຕ່ພວກພໍ່ຄ້າເຫຼົ່ານັ້ນຈຳນວນຫຼາຍ
ບໍ່ເຊື່ອຟັງຄຳຂອງນາຍກອງກວຽນຜູ້ດຽວນັ້ນ
ໃຊ້ຂວານອັນຄົມກິບຕັດຕົ້ນໄຮນັ້ນຕັ້ງແຕ່ເຫງົ້າຕົ້ນ

[໑໙໘]	ພວກນາກກໍອອກມາຈາກຕົ້ນໄຮນັ້ນສວມເກາະ ໒໕ ຕົນ
ຖືທະນູ ໓໐໐ ຕົນ ແລະຖືໂລ່ໜັງ ໖,໐໐໐ ຕົນ

(ພະຍານາກກ່າວສັ່ງວ່າ)

[໑໙໙]	ພວກເຈົ້າຈົ່ງຂ້າ ຈົ່ງມັດພວກພໍ່ຄ້າເຫຼົ່ານີ້
ຢ່າໄດ້ໄວ້ຊີວິດແມ່ນແຕ່ຄົນດຽວ
ພວກເຈົ້າຈົ່ງເຮັດພວກພໍ່ຄ້າເຫຼົ່ານັ້ນທັງໝົດໃຫ້ເປັນຜົງທຸລີ
ເວັ້ນໄວ້ແຕ່ນາຍກອງກວຽນທ່ານັ້ນ

(ພຣະສາດສະດາຊົງຮູ້ແລ້ວຕັດ ໔ ຄາຖາໂອວາດວ່າ)

[໔໐໐]	ຍ້ອນເຫດນັ້ນແລ ຄົນສະຫຼາດພິຈາລະນາເຫັນປະໂຫຍດຂອງຕົນ

ບໍ່ເພິ່ງຕົກໄປສູ່ອຳນາດແຫ່ງຄວາມໂລບ
ເພິ່ງກຳຈັດໃຈທີ່ເປັນສັດຕູພາຍໃນສາ

[໔໐໑] ຜູ້ເຫັນໄພຮູ້ໂທດແນວນີ້ວ່າ
ຕັນຫາເປັນເຫດໃຫ້ເກີດທຸກ
ເປັນຜູ້ປາສະຈາກຕັນຫາ ບໍ່ຢຶດໝັ້ນ ມີສະຕິ ດຳເນີນຊີວິດຢູ່

**ມະຫາວານິຊະຊາດົກທີ ໑໐ ຈົບ**

## ໑໑. ສາທິນະຣາຊະຊາດົກ (໔໙໔)
## ວ່າດ້ວຍພຣະເຈົ້າສາທິນະ

(ພວກມະນຸດດີໃຈຢືນປະຄອງອັນຊະລີ ໄດ້ກ່າວວ່າ)

[໔໐໒] ໜ້າອັດສະຈັນຈິງນໍ
ລົດທິບໄດ້ຜາກົດແກ່ພຣະເຈົ້າວິເທຫະ ຜູ້ເຮືອງຍົດ
ພຣະອົງຊົງອຸບັດຂຶ້ນມາໃນໂລກ ເຮັດໃຫ້ເກີດຂົນພອງສະຫຍອງເກົ້າ

(ພຣະສາດສະດາຊົງປະກາດຂໍ້ຄວາມນັ້ນວ່າ)

[໔໐໓] ມາຕະລີເທບພະບຸດ ເທບສາຣະຖີຜູ້ມີລິດຫຼາຍ
ທູນເຊີນສະເດັດພຣະເຈົ້າວິເທຫະຜູ້ຄອບຄອງມິຖິລານະຄອນວ່າ

[໔໐໔] ພຣະຣາຊາຜູ້ຊົງພຣະຄຸນອັນປະເສີດ ເປັນໃຫຍ່ທົ່ວທິດ
ຂໍເຊີນພຣະອົງສະເດັດຊົງລົດທິບນີ້ເທີ້ນ
ເທບຊັ້ນດາວວະດຶງທັງຫຼາຍ
ພ້ອມທັງອົງອຳມະຣິນຕ້ອງການຈະຊົງສົນທະນາກັບພຣະອົງ
ກໍເທບເຫຼົ່ານັ້ນຣະນຶກເຖິງພຣະອົງ
ປະຊຸມພ້ອມກັນຢູ່ທີ່ສະພາຊື່ສຸທຳມາ

[໔໐໕] ກໍລຳດັບນັ້ນ ພຣະເຈົ້າວິເທຫະຊົງພະນາມສາທິນະ
ຜູ້ຄອບຄອງມິຖິລານະຄອນ ສະເດັດປະທັບລົດທິບ
ເຊິ່ງທຽມດ້ວຍມ້າອັດສະດອນ ໑,໐໐໐ ຕົວ
ໄດ້ສະເດັດໄປໃນສຳນັກແຫ່ງເທບ
(ພຣະມະຫາຣາຊາປະທັບຢືນເທິງທິບພະຍະຍານ

ເຊິ່ງທຽມດ້ວຍມ້າອັດສະດອນ ໑,໐໐໐ ຕົວນໍາໄປ
ສະເດັດໄປຢູ່ ໄດ້ທອດພຣະເນດເຫັນເທວະສະພານີ້)
ເທບເມື່ອເຫັນພຣະຣາຊາສະເດັດມາກໍຍິນດີຕ້ອນຮັບພຣະອົງ

[໔໐໖] ຂໍເດຊະພຣະມະຫາຣາດ ພຣະອົງສະເດັດມາດີແລ້ວ
ບໍ່ແມ່ນສະເດັດມາຮ້າຍ ພຣະຣາຊາຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ບັດນີ້ ຂໍເຊີນປະທັບໃນສໍານັກທ້າວສັກກະເທວະຣາດເທີ້ນ

[໔໐໗] ແມ່ນທ້າວສັກກະກໍຊົງຍິນດີຕ້ອນຮັບ
ພຣະເຈົ້າວິເທຫະຜູ້ຄອບຄອງມິຖິລານະຄອນ
ທ້າວວາສະວະຊົງເຊື້ອເຊີນດ້ວຍກາມທັງຫຼາຍພ້ອມທັງອາສະນະ

[໔໐໘] ພຣະຣາຊາຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ເປັນການດີແທ້
ທີ່ພຣະອົງສະເດັດມາເຖິງສະຖານທີ່ຢູ່ແຫ່ງເຫຼົ່າເທບຜູ້ຄອງອໍານາດ
ຂໍເຊີນປະທັບຢູ່ໃນໝູ່ທວຍເທບຜູ້ມັ່ງຄັ່ງດ້ວຍກາມທຸກຢ່າງ
ຂໍພຣະອົງສະເຫວີຍກາມເຊິ່ງບໍ່ແມ່ນຂອງມະນຸດ
ໃນໝູ່ເທບຊັ້ນດາວວະດຶງເທີ້ນ

(ພຣະເຈົ້າສາທິນະຕັດກັບທ້າວສັກກະວ່າ)

[໔໐໙] ເມື່ອກ່ອນ ຂ້ານ້ອຍຢູ່ໃນສະຫວັນ
ຍ່ອມຍິນດີການຟ້ອນລໍາຂັບຮ້ອງແລະປະໂຄມດົນຕີ
ແຕ່ບັດນີ້ ວັນນີ້ຂ້ານ້ອຍນັ້ນຫາໄດ້ຍິນດີໃນສະຫວັນແຕ່ຢ່າງໃດ
ພຣະອົງຜູ້ປະເສີດກວ່າຈອມເທບ
ອາຍຸຂອງຂ້ານ້ອຍສິ້ນແລ້ວບໍ ຂ້ານ້ອຍໃກ້ຕາຍບໍ
ຫຼືວ່າຂ້ານ້ອຍຫຼົງໄປ

(ທ້າວສັກກະຕັດວ່າ)

[໔໑໐] ພຣະອົງຜູ້ກ້າຫານ ຜູ້ປະເສີດກວ່ານໍຣະຊົນ
ພຣະຊົນມາຍຸຂອງພຣະອົງຍັງບໍ່ສິ້ນໄປ
ຄວາມຕາຍກໍຍັງຢູ່ຫ່າງໄກ ແລະແມ່ນພຣະອົງກໍຍັງບໍ່ຫຼົງ
ແຕ່ບຸນທີ່ພຣະອົງສະເຫວີຍວິບາກຢູ່ໃນເທວະໂລກນີ້ຂອງພຣະອົງເຫຼືອຢູ່ໜ້ອຍ

[໔໑໑] ພຣະຣາຊາຜູ້ຊົງພຣະຄຸນອັນປະເສີດ ເປັນໃຫຍ່ທົ່ວທິດ

ຂໍເຊີນພຣະອົງປະທັບຢູ່ດ້ວຍເທວານຸພາບ
ສະເຫວີຍການເຊິ່ງບໍ່ແມ່ນຂອງມະນຸດໃນໝູ່ເທບຊັ້ນດາວວະດຶງເທີ້ນ

(ພຣະໂພທິສັດຊົງຫ້າມທ້າວສັກກະວ່າ)

[໔໑໒] ສິ່ງໃດທີ່ໄດ້ມາຍ້ອນເຫດທີ່ຜູ້ອື່ນໃຫ້ ສິ່ງນັ້ນປຽບກັນໄດ້
ເໝືອນຍານພາຫະນະທີ່ຢືມເຂົາມາ ເໝືອນຊັບທີ່ຢືມເຂົາມາ

[໔໑໓] ກໍສົມບັດທີ່ໄດ້ມາຍ້ອນເຫດທີ່ຜູ້ອື່ນໃຫ້ນັ້ນ ຂ້ານ້ອຍບໍ່ປາຖະໜາ
ບຸນທັງຫຼາຍທີ່ຂ້ານ້ອຍເຮັດເອງ
ບຸນນັ້ນຈະເປັນຊັບສະເພາະຕົນຂອງຂ້ານ້ອຍ

[໔໑໔] ຂ້ານ້ອຍນັ້ນໄປຢູ່ໃນໝູ່ມະນຸດແລ້ວຈະທຳກຸສົນໃຫ້ຫຼາຍ
ດ້ວຍການໃຫ້ທານ ການປະພຶດທຳໃຫ້ສະໝ່ຳສະເໝີ
ການສັງລວມແລະດ້ວຍການເຝິກຝົນອິນຊີ
ເຊິ່ງເປັນກຳທີ່ບຸກຄົນເຮັດແລ້ວມີຄວາມສຸກ
ແລະບໍ່ເຮັດໃຫ້ເດືອດຮ້ອນໃນພາຍຫຼັງ

(ພຣະໂພທິສັດຈູງພຣະຫັດພຣະເຈົ້ານາຣະທະທ່ຽວໄປໃນອຸທະຍານໄດ້ຕັດວ່າ)

[໔໑໕] ພູມິພາກຊື່ນີ້ຄືອຸທະຍານນັ້ນ
ຊື່ນີ້ຄືລຳຮາງໄຂນ້ຳພ້ອມທັງອ່າງຮອງຮັບນ້ຳທີ່ໄຫຼເຂົ້າມາ
ຊື່ນີ້ຄືພູມິພາກທັງ ໔ ຂ້າງແທ່ງລຳຮາງໄຂນ້ຳ
ເຊິ່ງປົກຄຸມດ້ວຍຫຍ້າຂຽວຂະຈີ
ຊື່ນີ້ຄືແມ່ນ້ຳທີ່ມີກະແສໄຫຼຢູ່ບໍ່ຂາດສາຍ
[໔໑໖] ຊື່ນີ້ຄືສະໂບກຂະຣະນີອັນໜ້າອອນຊອນ
ມີນົກຈັກກະພາກຂັນຂານສຽງຣະງົມ
ເດຍລະດາດໄປດ້ວຍດອກມົນທາລົບ ດອກປະທຸມ ແລະດອກອຸບົນ
ທີ່ເຫຼົ່າຊົນພາກັນຫຼົງໃຫຼຍຶດຖືວ່າເປັນຂອງເຮົາ
ເຂົາໄປໃສແລ້ວນໍ
[໔໑໗] ຊື່ນີ້ພື້ນທີ່ນັ້ນມີແຕ່ພື້ນດິນທີ່ຮົກທຳນັ້ນ
ມີແຕ່ສວນແລະແນວປ່າທຳນັ້ນເອງ
ນາຣະທະ ເມື່ອເຮົາເບິ່ງບໍ່ເຫັນໝູ່ຊົນນັ້ນ
ທິດທັງຫຼາຍຜາກົດແກ່ເຮົາເໝືອນກັບວ່າງເປົ່າ

(ພຣະເຈົ້າສາທິນະຕັດວ່າ)

[໔໑໗] ຂ້າພະເຈົ້າໄດ້ເຫັນວິມານສ່ອງແສງໄປທັງ ໔ ທິດ
ຕໍ່ພຣະພັກທ້າວເທວະຣາດແລະຕໍ່ໜ້າເທວະດາຊັ້ນໄຕຣທິດ

[໔໑໘] ເຮົາໄດ້ຢູ່ໃນທິບພະຍະວິມານ ບໍຣິໂພກການເຊິ່ງບໍ່ແມ່ນຂອງມະນຸດ
ໃນໝູ່ເທບຊັ້ນດາວວະດຶງທີ່ມັ່ງຄັ່ງດ້ວຍການທຸກຢ່າງ

[໔໒໐] ເຮົານັ້ນລະການເຊັ່ນນີ້ ມາໃນໂລກນີ້ເພື່ອຕ້ອງການທຳບຸນ
ຈະປະພຶດທຳຢ່າງດຽວ ບໍ່ຕ້ອງການຣາດຊະສົມບັດ

[໔໒໑] ເຮົາຈະດຳເນີນໄປຕາມທາງທີ່ບໍ່ຕ້ອງໃຊ້ອາດຍາ
ເຊິ່ງພຣະສຳມາສຳພຸດທະເຈົ້າຊົງສະແດງໄວ້ແລ້ວ
ເປັນທາງທີ່ທ່ານຜູ້ປະຕິບັດດີດຳເນີນໄປຢູ່

**ສາທິນະຣາຊະຊາດົກທີ ໑໑ ຈົບ**

## ໑໔. ທະສະພາມມະນະຊາດົກ (໔໙໕)
## ວ່າດ້ວຍການຈຳແນກຕະກູນພາມ ໑໐ ຕະກູນ

(ພຣະສາດສະດາຊົງປະກາດຂໍ້ຄວາມນີ້ວ່າ)

[໔໒໒] ພຣະເຈົ້າຢຸທິດຖີລະ ຜູ້ຊົງຝັກໃຝ່ໃນທຳ
ໄດ້ຕັດກັບວິທຸຣະອຳມາດວ່າ
ວິທຸຣະ ທ່ານຈົ່ງສະແຫວງຫາພາມຜູ້ມີສິນ ຜູ້ເປັນພະຫູສູດ

[໔໒໓] ຜູ້ເວັ້ນຈາກເມຖຸນທຳ ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງເຮົາ
ສະຫາຍ ເຮົາຈະຖວາຍທັກຂິນາໃນເຂດທີ່ເຮົາຖວາຍທານແລ້ວມີຜົນຫຼາຍ

(ວິທຸຣະອຳມາດຂາບທູນວ່າ)

[໔໒໔] ຂໍເດຊະພຣະອົງຜູ້ສົມມຸດຕິເທບ ພາມທັງຫຼາຍຜູ້ມີສິນ
ເປັນພະຫູສູດ ຜູ້ເວັ້ນຈາກເມຖຸນທຳ
ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງພຣະອົງຫາໄດ້ຍາກ ຂ້ານ້ອຍ

[໔໒໕] ຂໍເດຊະພຣະມະຫາຣາດ ໄດ້ຍິນວ່າ

ພາມມີຢູ່ ໑໐ ຕະກູນນຳກັນ
ຂໍພຣະອົງໂຜດສະດັບການຈຳແນກແຈກແຈງ
ພາມທັງ ໑໐ ຕະກູນນັ້ນ ໂດຍພິດສະດານຈາກຂ້າພຣະອົງເທີ້ນ

[໔໘໖] ພາມບາງພວກຖືຖົງທີ່ເຕັມດ້ວຍຮາກໄມ້ປາກປິດ
ຕິດສະລາກຢາແດ່ ຮົດນ້ຳມົນແດ່ ເປົ່າເສກຄາຖາອາຄົມແດ່

[໔໘໗] ແມ່ນພາມເຫຼົ່ານັ້ນເປັນເໝືອນໝໍ
ເຂົາກໍຮຽກກັນວ່າ ພາມ ຂໍເດຊະພຣະມະຫາຣາດ
ຂ້າພຣະອົງໄດ້ຂາບທູນພາມຜູ້ເປັນເໝືອນໝໍເຫຼົ່ານັ້ນ
ແດ່ພຣະອົງ ເຮົາຈະເຊື້ອເຊີນພາມເຊັ່ນນັ້ນບໍ ຂ້ານ້ອຍ

(ພຣະເຈົ້າໂກຣັບພະຍະຕັດວ່າ)

[໔໘໘] ກໍພາມເຫຼົ່ານັ້ນປາສະຈາກຄຸນເຄື່ອງຄວາມເປັນພາມ
ຈະຮຽກພວກເຂົາວ່າເປັນພາມບໍ່ໄດ້
ວິທຸຣະ ທ່ານຈົ່ງສະແຫວງຫາພາມເຫຼົ່າອື່ນຜູ້ມີສີນ ຜູ້ເປັນພະຫູສູດ
[໔໘໙] ຜູ້ເວັ້ນຈາກເມຖຸນທຳ ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງເຮົາ
ສະຫາຍ ເຮົາຈະຖວາຍທັກຂິນາໃນເຂດທີ່ເຮົາຖວາຍທານແລ້ວມີຜົນຫຼາຍ

(ວິທຸຣະອຳມາດຂາບທູນວ່າ)

[໔໙໐] ພາມອີກພວກໜຶ່ງຖືກັງສະດານປ່າວປະກາດໄປຂ້າງໜ້າແດ່
ຮັບໃຊ້ແດ່ ສຶກສາວິຊາການກ່ຽວກັບລົດແດ່
[໔໙໑] ແມ່ນພາມເຫຼົ່ານັ້ນເປັນເໝືອນຄົນຮັບໃຊ້
ເຂົາກໍຮຽກກັນວ່າ ພາມ ຂໍເດຊະພຣະມະຫາຣາດ
ຂ້າພຣະອົງໄດ້ຂາບທູນພາມຜູ້ເປັນເໝືອນຄົນຮັບໃຊ້ເຫຼົ່ານັ້ນ
ແດ່ພຣະອົງ
ເຮົາຈະເຊື້ອເຊີນພາມເຊັ່ນນັ້ນບໍ ຂ້ານ້ອຍ

(ພຣະເຈົ້າໂກຣັບພະຍະຕັດວ່າ)

[໔໙໔] ກໍພາມເຫຼົ່ານັ້ນປາສະຈາກຄຸນເຄື່ອງຄວາມເປັນພາມ
ຈະຮຽກພວກເຂົາວ່າເປັນພາມບໍ່ໄດ້
ວິທຸຣະ ທ່ານຈົ່ງສະແຫວງຫາພາມເຫຼົ່າອື່ນຜູ້ມີສີນ ຜູ້ເປັນພະຫູສູດ

[໔໓໓] ຜູ້ເວັ້ນຈາກເມຖຸນທຳ ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງເຮົາ
ສະຫາຍ ເຮົາຈະຖວາຍທັກຂິນາໃນເຂດທີ່ເຮົາຖວາຍທານແລ້ວມີຜົນຫຼາຍ

(ວິທຸຣະອຳມາດຂາບທູນວ່າ)

[໔໓໔] ພາມອີກພວກໜຶ່ງຖືຄົນໂທນ້ຳແລະໄມ້ເຖົ້າຄົດ
ເຂົ້າໄປເພິ່ງພາພຣະຣາຊາໃນຄາມແລະນິຄົມດ້ວຍຕັ້ງໃຈວ່າ
ເມື່ອຊາວບ້ານຫຼືຊາວນິຄົມບໍ່ໃຫ້ ເຮົາຈະບໍ່ອອກໄປ

[໔໓໕] ແມ່ນພາມເຫຼົ່ານັ້ນເປັນເໝືອນຜູ້ກົດຂີ່
ເຂົາກໍຮຽກກັນວ່າ ພາມ ຂໍເດຊະພຣະມະຫາຣາດ
ຂ້າພຣະອົງໄດ້ຂາບທູນພາມຜູ້ເປັນເໝືອນຜູ້ກົດຂີ່ເຫຼົ່ານັ້ນ
ແດ່ພຣະອົງ ເຮົາຈະເຊື້ອເຊີນພາມເຊັ່ນນັ້ນບໍ ຂ້ານ້ອຍ

(ພຣະເຈົ້າໂກຣັບພະຍະຕັດວ່າ)

[໔໓໖] ກໍພາມເຫຼົ່ານັ້ນປາສະຈາກຄຸນເຄື່ອງຄວາມເປັນພາມ
ຈະຮຽກພວກເຂົາວ່າເປັນພາມບໍ່ໄດ້
ວິທຸຣະ ທ່ານຈົ່ງສະແຫວງຫາພາມເຫຼົ່າອື່ນຜູ້ມີສີນ ຜູ້ເປັນພະຫູສູດ

[໔໓໗] ຜູ້ເວັ້ນຈາກເມຖຸນທຳ ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງເຮົາ
ສະຫາຍ ເຮົາຈະຖວາຍທັກຂິນາໃນເຂດທີ່ເຮົາຖວາຍທານແລ້ວມີຜົນຫຼາຍ

(ວິທຸຣະອຳມາດຂາບທູນວ່າ)

[໔໓໘] ພາມອີກພວກໜຶ່ງ ມີຂົນຂີ້ແຮ້ ເລັບ ແລະຂົນງອກຂຶ້ນຍາວ
ມີຂີ້ແຂ້ວ ມີຝຸ່ນເທິງຫົວ ຕົນໂຕເປິະເປື້ອນເຕັມໄປດ້ວຍຝຸ່ນ
ເປັນພວກຍາຈົກທ່ຽວໄປຢູ່

[໔໓໙] ແມ່ນພາມເຫຼົ່ານັ້ນເປັນເໝືອນຄົນຂຸດຕໍໄມ້ທີ່ຖືກໄຟໄໝ້
ເຂົາກໍຮຽກກັນວ່າ ພາມ ຂໍເດຊະພຣະມະຫາຣາດ
ຂ້າພຣະອົງໄດ້ຂາບທູນພາມຜູ້ເປັນເໝືອນຄົນຂຸດຕໍໄມ້
ທີ່ຖືກໄຟໄໝ້ເຫຼົ່ານັ້ນແດ່ພຣະອົງ
ເຮົາຈະເຊື້ອເຊີນພາມເຊັ່ນນັ້ນບໍ ຂ້ານ້ອຍ

(ພຣະເຈົ້າໂກຣັບພະຍະຕັດວ່າ)

[໔໔໐] ກໍພາມເຫຼົ່ານັ້ນປາສະຈາກຄຸນເຄື່ອງຄວາມເປັນພາມ
ຈະຮຽກພວກເຂົາວ່າເປັນພາມບໍ່ໄດ້
ວິທຸຣະ ທ່ານຈົ່ງສະແຫວງຫາພາມເຫຼົ່າອື່ນຜູ້ມີສີນ ຜູ້ເປັນພະຫູສູດ

[໔໔໑] ຜູ້ເວັ້ນຈາກເມຖຸນທຳ ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງເຮົາ
ສະຫາຍ ເຮົາຈະຖວາຍທັກຂິນາໃນເຂດທີ່ເຮົາຖວາຍທານແລ້ວມີຜົນຫຼາຍ

(ວິທຸຣະອຳມາດຂາບທູນວ່າ)

[໔໔໒] ຂໍເດຊະພຣະອົງຜູ້ເປັນໃຫຍ່ແຫ່ງເຫຼົ່າຊົນ
ພາມອີກພວກໜຶ່ງຍ່ອມຄ້າຂາຍໝາກຂາມປ້ອມ
ໝາກມ່ວງ ໝາກຫວ້າ ສົ້ມມໍພິເພກ ໝາກມີ້ປ່າ
ໄມ້ຊຳຣະແຂ້ວ ໝາກຕູມ ແລະໝາກກະທັນ

[໔໔໓] ໝາກໂລ່ແຊ່ງແຫ້ງ ອ້ອຍລຳ ນ້ຳອ້ອຍປ່ຽງ ກ້ອງສູບຢາເສັ້ນ ນ້ຳເຜີ້ງ
ແລະຢາຢອດຕາ ແລະຍ່ອມຄ້າຂາຍສິ່ງຂອງທີ່ມີຄ່າຫຼາຍແລະມີຄ່າໜ້ອຍ

[໔໔໔] ແມ່ນພາມເຫຼົ່ານັ້ນເປັນເໝືອນພໍ່ຄ້າ
ເຂົາກໍຮຽກກັນວ່າ ພາມ ຂໍເດຊະພຣະມະຫາຣາດ
ຂ້າພຣະອົງໄດ້ຂາບທູນພາມຜູ້ເປັນເໝືອນພໍ່ຄ້າເຫຼົ່ານັ້ນ
ແດ່ພຣະອົງ ເຮົາຈະເຊື້ອເຊີນພາມເຊັ່ນນັ້ນບໍ ຂ້ານ້ອຍ

(ພຣະເຈົ້າໂກຣັບພະຍະຕັດວ່າ)

[໔໔໕] ກໍພາມເຫຼົ່ານັ້ນປາສະຈາກຄຸນເຄື່ອງຄວາມເປັນພາມ
ຈະຮຽກພວກເຂົາວ່າເປັນພາມບໍ່ໄດ້
ວິທຸຣະ ທ່ານຈົ່ງສະແຫວງຫາພາມເຫຼົ່າອື່ນຜູ້ມີສີນ ຜູ້ເປັນພະຫູສູດ

[໔໔໖] ຜູ້ເວັ້ນຈາກເມຖຸນທຳ ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງເຮົາ
ສະຫາຍ ເຮົາຈະຖວາຍທັກຂິນາໃນເຂດທີ່ເຮົາຖວາຍທານແລ້ວມີຜົນຫຼາຍ

(ວິທຸຣະອຳມາດຂາບທູນວ່າ)

[໔໔໗] ພາມອີກພວກໜຶ່ງໃຫ້ກະທຳກະສິກຳແລະພານິຊະກຳ
ລ້ຽງແບ້ ລ້ຽງແກະ ຕົກແຕ່ງຍິງສາວ
ກະທຳວິວາຫະມຸງຄຸນແລະອາວາຫະມຸງຄຸນ

[໔໔໗] ແມ່ນພາມເຫຼົ່ານັ້ນເປັນເໝືອນພໍ່ຄ້າຄະຫະບໍດີ
ເຂົາກໍຮຽກກັນວ່າ ພາມ ຂໍເດຊະພຣະມະຫາຣາດ
ຂ້າພຣະອົງໄດ້ຂາບທູນພາມຜູ້ເປັນເໝືອນພໍ່ຄ້າຄະຫະບໍດີເຫຼົ່ານັ້ນ
ແດ່ພຣະອົງ ເຮົາຈະເຊື້ອເຊີນພາມເຊັ່ນນັ້ນບໍ ຂ້ານ້ອຍ

(ພຣະເຈົ້າໂກຣັບພະຍະຕັດວ່າ)

[໔໔໙] ກໍພາມເຫຼົ່ານັ້ນປາສະຈາກຄຸນເຄື່ອງຄວາມເປັນພາມ
ຈະຮຽກພວກເຂົາວ່າເປັນພາມບໍ່ໄດ້
ວິທຸຣະ ທ່ານຈົ່ງສະແຫວງຫາພາມເຫຼົ່າອື່ນຜູ້ມີສີນ ຜູ້ເປັນພະຫູສູດ

[໔໕໐] ຜູ້ເວັ້ນຈາກເມຖຸນທຳ ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງເຮົາ
ສະຫາຍ ເຮົາຈະຖວາຍທັກຂິນາໃນເຂດທີ່ເຮົາຖວາຍທານແລ້ວມີຜົນຫຼາຍ

(ວິທຸຣະອຳມາດຂາບທູນວ່າ)

[໔໕໑] ພາມອີກພວກໜຶ່ງເປັນປຸໂຣຫິດປະຈຳບ້ານ
ບໍຣິໂພຄພິກສາທີ່ເຂົາເກັບໄວ້ເພື່ອຕົນ
ຊົນຈຳນວນຫຼາຍຍ່ອມສອບຖາມພາມເຫຼົ່ານັ້ນ
ພາມເຫຼົ່ານັ້ນເປັນນັກຕ້ອນສັດແລະຕີກາສັດ

[໔໕໒] ແມ່ນສັດລ້ຽງທັງຫຼາຍ ເຊັ່ນ ກະບື ໝູ ແລະແບ້
ໃນບ້ານເຫຼົ່ານັ້ນ ກໍຖືກພາມເຫຼົ່ານັ້ນຂ້າ
ແມ່ນພວກພາມເຫຼົ່ານັ້ນເປັນເໝືອນນາຍໂຄຄາດ
ເຂົາກໍຮຽກກັນວ່າ ພາມ ຂໍເດຊະພຣະມະຫາຣາດ
ຂ້າພຣະອົງໄດ້ຂາບທູນພາມຜູ້ເປັນເໝືອນນາຍໂຄຄາດເຫຼົ່ານັ້ນ
ແດ່ພຣະອົງ ເຮົາຈະເຊື້ອເຊີນພາມເຊັ່ນນັ້ນບໍ ຂ້ານ້ອຍ

(ພຣະເຈົ້າໂກຣັບພະຍະຕັດວ່າ)

[໔໕໓] ກໍພາມເຫຼົ່ານັ້ນປາສະຈາກຄຸນເຄື່ອງຄວາມເປັນພາມ
ຈະຮຽກພວກເຂົາວ່າເປັນພາມບໍ່ໄດ້
ວິທຸຣະ ທ່ານຈົ່ງສະແຫວງຫາພາມເຫຼົ່າອື່ນຜູ້ມີສີນ ຜູ້ເປັນພະຫູສູດ
[໔໕໔] ຜູ້ງົດເວັ້ນຈາກເມຖຸນທຳ ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງເຮົາ
ສະຫາຍ ເຮົາຈະຖວາຍທັກຂິນາໃນເຂດທີ່ເຮົາຖວາຍທານແລ້ວມີຜົນຫຼາຍ

(ວິທຸຣະອຳມາດຂາບທູນວ່າ)

[໔໕໕] ພາມທັງຫຼາຍຖືດາບແລະໂລ່ໜັງ ເນັບມີດ
ຢືນດັກຢູ່ທີ່ທາງເດີນຂອງພວກພໍ່ຄ້າແດ່
ຖ້າຄຸ້ມຄອງກອງກວຽນແດ່
[໔໕໖] ແມ່ນພາມເຫຼົ່ານັ້ນເປັນເໝືອນຄົນລ້ຽງງົວ
ແລະໂຈນປຸ້ນຂ້າຊາວບ້ານເຂົາກໍຮຽກກັນວ່າພາມ
ຂໍເດຊະພຣະມະຫາຣາດ ຂ້າພຣະອົງໄດ້ຂາບທູນພາມ
ຜູ້ເປັນເໝືອນຄົນລ້ຽງງົວແລະໂຈນປຸ້ນຂ້າຊາວບ້ານເຫຼົ່ານັ້ນ
ແດ່ພຣະອົງ ເຮົາຈະເຊື້ອເຊີນພາມເຊັ່ນນັ້ນບໍ ຂ້ານ້ອຍ

(ພຣະເຈົ້າໂກຣັບພະຍະຕັດວ່າ)

[໔໕໗] ກໍພວກພາມເຫຼົ່ານັ້ນປາສະຈາກຄຸນເຄື່ອງຄວາມເປັນພາມ
ຈະຮຽກພວກເຂົາວ່າເປັນພາມບໍ່ໄດ້
ວິທຸຣະ ທ່ານຈົ່ງສະແຫວງຫາພາມເຫຼົ່າອື່ນຜູ້ມີສີນ ຜູ້ເປັນພະຫູສູດ
[໔໕໘] ຜູ້ງົດເວັ້ນຈາກເມຖຸນທຳ ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງເຮົາ
ສະຫາຍ ເຮົາຈະຖວາຍທັກຂິນາໃນເຂດທີ່ເຮົາຖວາຍທານແລ້ວມີຜົນຫຼາຍ

(ວິທຸຣະອຳມາດຂາບທູນວ່າ)

[໔໕໙] ພາມອີກພວກໜຶ່ງສ້າງຕູບຢູ່ໃນປ່າ
ເຮັດເຄື່ອງດັກສັດ ບຽດບຽນກະຕ່າຍ
ເສືອປາແມວ ປາ ແລະເຕົ່າ ຕະຫຼອດຈົນເຖິງເຫ້ຍ
[໔໖໐] ແມ່ນພາມເຫຼົ່ານັ້ນເປັນເໝືອນນາຍພານ
ເຂົາກໍຮຽກກັນວ່າ ພາມ ຂໍເດຊະພຣະມະຫາຣາດ
ຂ້າພຣະອົງໄດ້ຂາບທູນພາມ
ຜູ້ເປັນເໝືອນນາຍພານເຫຼົ່ານັ້ນແດ່ພຣະອົງ
ເຮົາຈະເຊື້ອເຊີນພາມເຊັ່ນນັ້ນບໍ ຂ້ານ້ອຍ

(ພຣະເຈົ້າໂກຣັບພະຍະຕັດວ່າ)

[໔໖໑] ກໍພາມເຫຼົ່ານັ້ນປາສະຈາກຄຸນເຄື່ອງຄວາມເປັນພາມ
ຈະຮຽກພວກເຂົາວ່າເປັນພາມບໍ່ໄດ້
ວິທຸຣະ ທ່ານຈົ່ງສະແຫວງຫາພາມເຫຼົ່າອື່ນຜູ້ມີສີນ ຜູ້ເປັນພະຫູສູດ

[໔໖໔] ຜູ້ເວັ້ນຈາກເມຖຸນທຳ ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງເຮົາ
ສະຫາຍ ເຮົາຈະຖວາຍທັກຂິນາໃນເຂດທີ່ເຮົາຖວາຍທານແລ້ວມີຜົນຫຼາຍ

(ວິທຸຣະອຳມາດຂາບທູນວ່າ)

[໔໖໓] ພາມອີກພວກໜຶ່ງປາຖະໜາຊັບກຳລົງນອນຢູ່ໃຕ້ຕຽງ
ເມື່ອເລີ່ມເຮັດພິທີໂສມະຍາຄະ
ກໍໃຫ້ພຣະຣາຊາທັງຫຼາຍອາບນ້ຳໃນເບື້ອງເທິງ

[໔໖໔] ແມ່ນພາມເຫຼົ່ານັ້ນເປັນເໝືອນຄົນຂັດຂີ້ມ້ຽງ
ເຂົາກໍຮຽກກັນວ່າ ພາມ ຂໍເດຊະພຣະມະຫາຣາດ
ຂ້າພຣະອົງໄດ້ຂາບທູນພາມຜູ້ເປັນເໝືອນຄົນຂັດຂີ້ມ້ຽງເຫຼົ່ານັ້ນ
ແດ່ພຣະອົງ ເຮົາຈະເຊື້ອເຊີນພາມເຊັ່ນນັ້ນບໍ ຂ້ານ້ອຍ

(ພຣະເຈົ້າໂກຣັບພະຍະຕັດວ່າ)

[໔໖໕] ກໍພວກພາມເຫຼົ່ານັ້ນປາສະຈາກຄຸນເຄື່ອງຄວາມເປັນພາມ
ຈະຮຽກພວກເຂົາວ່າເປັນພາມບໍ່ໄດ້
ວິທຸຣະ ທ່ານຈົ່ງສະແຫວງຫາພາມເຫຼົ່າອື່ນຜູ້ມີສິນ ຜູ້ເປັນພະຫູສູດ
[໔໖໖] ຜູ້ງົດເວັ້ນຈາກເມຖຸນທຳ ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງເຮົາ
ເຮົາຈະຖວາຍທັກຂິນາໃນເຂດທີ່ເຮົາຖວາຍທານແລ້ວມີຜົນຫຼາຍ

(ວິທຸຣະອຳມາດເມື່ອສະແດງຜູ້ເປັນພາມພຽງແຕ່ຊື່ ບັດນີ້ ເພື່ອຈະສະແດງຜູ້ເປັນພາມໂດຍປະຣະມັດ ຈຶ່ງໄດ້ກ່າວ ໔ ຄາຖາວ່າ)

[໔໖໗] ຂໍເດຊະພຣະອົງຜູ້ສົມມຸດຕິເທບ ພາມທັງຫຼາຍ
ຜູ້ມີສິນ ຜູ້ເປັນພະຫູສູດ ຜູ້ງົດເວັ້ນຈາກເມຖຸນທຳ
ເຊິ່ງສົມຄວນຈະບໍຣິໂພກໂພຊະນະຂອງພຣະອົງຍັງມີຢູ່ ຂ້ານ້ອຍ
[໔໖໘] ພາມເຫຼົ່ານັ້ນບໍຣິໂພກພັດຕາຫານຄາບດຽວ
ແລະບໍ່ດື່ມນ້ຳເມົາ ຂໍເດຊະພຣະມະຫາຣາດ
ຂ້າພຣະອົງໄດ້ຂາບທູນພາມເຫຼົ່ານັ້ນແດ່ພຣະອົງ
ເຮົາຈະເຊື້ອເຊີນພາມເຊັ່ນນັ້ນບໍ ຂ້ານ້ອຍ

(ພຣະເຈົ້າໂກຣັບພະຍະຊົງສະດັບດັ່ງນັ້ນແລ້ວດີພຣະຫະໄທ ຈຶ່ງຕັດວ່າ)

[໔໖໙] ວິທຸຣະ ພາມເຫຼົ່ານັ້ນເປັນຜູ້ມີສິນ ເປັນພະຫູສູດ
ທ່ານຈິ່ງສະແຫວງຫາພາມເຫຼົ່ານັ້ນແລ
ວິທຸຣະ ຈິ່ງຮີບນິມົນພວກທ່ານມາໄວ ໆ

**ທະສະພາມມະນະຊາດົກາທີ 18 ຈົບ**

## ໑໖. ພິກຂາປະຣຳປະຣະຊາດົກາ (໔໙໖)
## ວ່າດ້ວຍເຂດທີ່ຖວາຍທານແລ້ວມີຜົນຫຼາຍ

(ກຸດຸມພີທູນຖາມພຣະຣາຊາວ່າ)

[໔໗໐] ຂ້າພຣະອົງໄດ້ເຫັນພຣະອົງຜູ້ຊົງເປັນສຸຂຸມາລະຊາດ
ປະທັບຢູ່ໃນປາງຜາສາດອັນປະເສີດ
ສະເດັດບັນທົມເທິງເຄື່ອງປູອັນສູງໃຫຍ່
ສະເດັດຈາກແຄວ້ນມາຍັງປັດຈັນຕະຊົນນະບົດເຊັ່ນກັບທີ່ປ່າປາສະຈາກນ້ຳ

[໔໗໑] ຈຶ່ງໄດ້ທູນຖວາຍພັດຕາຫານອັນວິຈິດ
ຄືເຂົ້າສຸກແຫ່ງເຂົ້າສາລີອັນດີເລີດ
ເຊິ່ງມີກັບທີ່ປຸງດ້ວຍຊີ້ນອັນສະອາດ
ດ້ວຍຄວາມເຄົາລົບຮັກຕໍ່ພຣະອົງ

[໔໗໔] ພຣະອົງຜູ້ຊົງຮັບພັດນັ້ນແລ້ວໄດ້ພຣະຣາດຊະທານໃຫ້ພາມ
ບໍ່ສະເຫວີຍດ້ວຍພຣະອົງເອງ
ຂໍ້ນີ້ເປັນທຳອັນໃດຂອງພຣະອົງບໍ
ຂ້າພຣະອົງ ຂໍຖວາຍບັງຄົມພຣະອົງ

(ພຣະຣາຊາຕັດຕອບວ່າ)

[໔໗໖] ພາມເປັນອາຈານຂອງເຮົາ
ເປັນຜູ້ຂວນຂວາຍໃນກິດໃຫຍ່ນ້ອຍ
ເປັນຄູ ແລະເປັນຜູ້ທີ່ຄວນຈະເຊື້ອເຊີນ
ເຮົາຈຶ່ງຄວນໃຫ້ໂພຊະນະແກ່ເຂົາ

(ກຸດຸມພີກ່າວກັບພາມວ່າ)

[໘໗໔] ບັດນີ້ ຂ້າພະເຈົ້າຂໍຖາມທ່ານພາມຜູ້ໂຄຕະມະໂຄດ
ທີ່ພຣະຣາຊາຊົງບູຊາ
ພຣະຣາຊາໄດ້ພຣະຣາດຊະທານພັດແກ່ທ່ານ
ເຊິ່ງມີກັບທີ່ປຸງດ້ວຍຊີ້ນສະອາດແກ່ທ່ານ

[໘໗໕] ທ່ານໄດ້ຮັບພຣະຣາດຊະທານພັດຕາຫານນັ້ນແລ້ວ
ກັບຖວາຍໂພຊະນະແກ່ລືສີ
ທ່ານຄົງຈະຮູ້ຕົວຕີວ່າ ບໍ່ແມ່ນເນື້ອນາບຸນແຫ່ງທານ
ຂໍ້ນີ້ເປັນທຳອັນໃດຂອງທ່ານບໍ
ຂ້າພະເຈົ້າຂໍນອບນ້ອມທ່ານ

(ພາມຕອບວ່າ)

[໘໗໖] ຂ້າພະເຈົ້າຍັງຕ້ອງລ້ຽງບຸດແລະພັນລະຍາ
ເປັນຜູ້ຕິດໃນຄອບຄົວ
ເຖິງຈະຖວາຍອະນຸສາດແກ່ພຣະຣາຊາ
ກໍຍັງບໍຣິໂພກການເຊິ່ງເປັນຂອງມະນຸດ

[໘໗໗] ຂ້າພະເຈົ້າຄວນຈະຖວາຍໂພຊະນະແກ່ລືສີຜູ້ຢູ່ປ່າ
ພໍ່າເພັງຕະບະມາດົນນານ ຜູ້ຈະເລີນດ້ວຍຄຸນ ອົບຮົມຕົນແລ້ວ

(ກຸດຸມພີກ່າວກັບລືສີວ່າ)

[໘໗໘] ບັດນີ້ ຂ້າພະເຈົ້າຂໍຖາມລືສີຜູ້ຜອມ
ມີຮ່າງກາຍສະພັ່ງດ້ວຍເສັ້ນເອັນ
ມີຂົນຂີ້ແຮ້ ເລັບ ແລະຂົນງອກຂຶ້ນຍາວ
ມີຂີ້ແຂ້ວເຂີ ມີຝຸ່ນເທິງຫົວ

[໘໗໙] ທ່ານຢູ່ຜູ້ດຽວໃນປ່າ ບໍ່ຄຳນຶງເຖິງຊີວິດ
ຍ້ອນເຫດໃດ ພິກຂຸຈຶ່ງດີກວ່າທ່ານ
ເຖິງກັບທ່ານຍອມຖວາຍໂພຊະນະ

(ລືສີຕອບວ່າ)

[໘໘໐] ອາດຕະມາຍັງຂຸດມັນເທດແລະເຫງົ້າຕານ

ມັນມີເສືອ ແລະຫົວຫອມ ຫົວກະທຽມຢູ່
ນວດເຂົ້າຟ່າງແລະໝາກເດືອຍ ລວບລວມຕາກໃຫ້ແຫ້ງ

[໔໗໑] ອາດຕະມາຍັງສະແຫວງຫາຜັກ ເຫງົ້າບົວ ນ້ຳເຜີ້ງ ຊີ້ນ
ໝາກກະທັນ ແລະໝາກຂາມປ້ອມເຫຼົ່ານັ້ນມາບໍຣິໂພກຢູ່
ອາດຕະມາຍັງມີການຍຶດຖືນັ້ນຢູ່

[໔໗໔] ເມື່ອອາດຕະມາຍັງຫຸງໂພຊະນະ ຍັງມີຄວາມກັງວົນ
ຍັງມີຄວາມຍຶດໝັ້ນຖືໝັ້ນຢູ່
ຄວນຖວາຍໂພຊະນະແກ່ທ່ານຜູ້ບໍ່ຫຸງ
ຜູ້ລະເວັ້ນຄວາມຍຶດຖືວ່າເປັນຂອງເຮົາ
ບໍ່ມີຄວາມຍຶດໝັ້ນຖືໝັ້ນ

(ກຸດຸມພີກ່າວກັບພຣະປັດເຈກພຸດທະເຈົ້າວ່າ)

[໔໗໓] ບັດນີ້ ຂ້າພະເຈົ້າຂໍຖາມພິກຂຸຜູ້ນັ່ງນິ່ງ
ມີຂໍ້ວັດອັນດີງາມ
ລືສີໄດ້ຖວາຍພັດຕາຫານ
ເຊິ່ງມີກັບທີ່ປຸງດ້ວຍຊີ້ນສະອາດແກ່ທ່ານ

[໔໗໔] ທ່ານຮັບພັດຕາຫານນັ້ນແລ້ວ ນັ່ງນິ່ງສັນແຕ່ຜູ້ດຽວ
ບໍ່ເຊື້ອເຊີນໃຜອື່ນ
ຂໍ້ນີ້ເປັນທຳອັນໃດຂອງທ່ານບໍ
ຂ້າພະເຈົ້າຂໍນອບນ້ອມທ່ານ

(ພຣະປັດເຈກພຸດທະເຈົ້າຕອບວ່າ)

[໔໗໕] ອາດຕະມາບໍ່ໄດ້ຫຸງເອງ
ບໍ່ໄດ້ໃຊ້ໃຫ້ໃຜຫຸງ
ບໍ່ໄດ້ຕັດເອງ ບໍ່ໄດ້ໃຊ້ໃຫ້ໃຜຕັດ
ຍ້ອນຮູ້ວ່າ ອາດຕະມານັ້ນບໍ່ມີຄວາມກັງວົນ
ງົດເວັ້ນຈາກບາບທັງປວງ

[໔໗໖] ລືສີຈິ່ງຖືເອົາພິກສາດ້ວຍມືຊ້າຍ
ຖືຄົນໂທນ້ຳດ້ວຍມືຂວາ

ໄດ້ຖວາຍພັດຕາທານ
ເຊິ່ງມີກັບທີ່ປຸງດ້ວຍຊີ້ນສະອາດແກ່ອາດຕະມາ

[໔໗໗] ເພາະຊົນທັງຫຼາຍເຫຼົ່ານີ້ຍັງມີຄວາມຍຶດໝັ້ນວ່າເປັນຂອງເຮົາ
ຍັງມີຄວາມຍຶດໝັ້ນຖືໝັ້ນຈຶ່ງຄວນໃຫ້ທານ
ສ່ວນອາດຕະມາສໍາຄັນວ່າ ຜູ້ເຊື້ອເຊີນ ຜູ້ຖວາຍ ເປັນປະຕິປະທາທີ່ຜິດ

(ກຸດຸມພີຟັງຄໍາຂອງພຣະປັດເຈກພຸດທະເຈົ້າແລ້ວດີໃຈ ຈຶ່ງກ່າວວ່າ)

[໔໗໘] ວັນນີ້ ພຣະຣາຊາຜູ້ເປັນຈອມທັບ
ສະເດັດມາບ່ອນນີ້ເພື່ອປະໂຫຍດແກ່ເຮົາແທ້ ໆ
ຂ້າພຣະອົງຮູ້ຄັກໃນວັນນີ້ເຖິງເຂດທີ່ຖວາຍທານແລ້ວມີຜົນຫຼາຍ

[໔໗໙] ພຣະຣາຊາທັງຫຼາຍຊົງພໍພຣະຫະໄທໃນແຄວ້ນ
ພາມທັງຫຼາຍພໍໃຈໃນກິດນ້ອຍໃຫຍ່
ລືສີທັງຫຼາຍພໍໃຈໃນມູນຜະລາຫານ
ສ່ວນພິກຂຸທັງຫຼາຍຫຼຸດພົ້ນແລ້ວ

**ພິກຂາປະຣຳປະຣະຊາດົກທີ ໑໓ ຈົບ**

## ລວມຊາດົກທີ່ມີໃນນິບາດນີ້ ຄື

໑. ສາລິເກທາຣະຊາດົກ
໒. ຈັນທະກິນນະຣີຊາດົກ
໓. ມະຫາອຸກກຸສະຊາດົກ
໔. ອຸດທາລະກະຊາດົກ
໕. ພິສະຊາດົກ
໖. ສຸຣຸຈິຊາດົກ
໗. ປັນຈຸໂປສະຖິກະຊາດົກ
໘. ມະຫາໂມຣະຊາດົກ
໙. ຕັດສະສູກະຣະຊາດົກ
໑໐. ມະຫາວານິຊະຊາດົກ
໑໑. ສາທິນະຣາຊະຊາດົກ
໑໒. ທະສະພາມມະນະຊາດົກ
໑໓. ພິກຂາປະຣຳປະຣະຊາດົກ

**ປະກິນນະກະນິບາດ ຈົບ**

# ໑໕. ວີສະຕິນິບາດ

## ໑. ມາຕັງຄະ ຊາດົກ (໔໙໗)
## ວ່າດ້ວຍອານຸພາບຂອງລືສີມາຕັງຄະ

(ມັນທັບພະຍະກຸມານຕັດກັບມາຕັງຄະດາບົດວ່າ)

[໑] ທ່ານມາຈາກໃສນໍ?
ນຸ່ງຜ້າເກົ່າຂາດອຸ້ຍຍຸ້ຍ ເໝືອນຜີສາດ ເປື້ອນຝຸ່ນ
ສວມໃສ່ເສດຜ້າຈາກກອງຂີ້ເຫຍື້ອພັນຈົນເຖິງຄໍ
ທ່ານບໍ່ແມ່ນທັກຂີໄນຍະບຸກຄົນ ແລ້ວເປັນໃຜກັນແນ່

(ພຣະໂພທິສັດຂາບທູນວ່າ)

[໒] ຂໍຖວາຍພຣະພອນພຣະອົງຜູ້ພຽບພ້ອມດ້ວຍຍົດ
ພາມທັງຫຼາຍຍ່ອມຂົບສັນແລະດື່ມກິນອາຫານ
ທີ່ພຣະອົງຊົງກະກຽມໄວ້
ພຣະອົງກໍຊົງຮູ້ວ່າ ອາດຕະມາອາໄສອາຫານທີ່ຜູ້ອື່ນໃຫ້ລ້ຽງຊີວິດ
ຂໍຄົນຈັນທານຈົ່ງໄດ້ກ້ອນເຂົ້າທີ່ຕ້ອງການລຸກຂຶ້ນຢືນຮັບເທີ້ນ

(ມັນທັບພະຍະກຸມານຕັດວ່າ)

[໓] ອາຫານນີ້ເຮົາກະກຽມໄວ້ສຳລັບພາມທັງຫຼາຍ
ອາຫານນີ້ຍ່ອມເປັນໄປເພື່ອປະໂຫຍດແກ່ຕົນ ສຳລັບເຮົາຜູ້ເຊື່ອໝັ້ນ
ທ່ານຈົ່ງຫຼີກໄປແຕ່ທີ່ນີ້ເທີ້ນ ຈະຢືນຢູ່ເຮັດຫຍັງ
ພາມຜູ້ຊົ່ວຊ້າ ຄົນເຊັ່ນເຮົາຈະບໍ່ໃຫ້ທ່ານ

(ພຣະໂພທິສັດຂາບທູນວ່າ)

[໔] ຄົນທັງຫຼາຍເມື່ອຫວັງຜົນຍ່ອມຫວ່ານພືດລົງໃນນາໂນນ ໑
ໃນນາລຸ່ມ ໑ ໃນທີ່ບໍ່ໃກ້ແມ່ນ້ຳ ໑ ດ້ວຍຄວາມເຊື່ອນັ້ນ
ຂໍພຣະອົງຈົ່ງໃຫ້ທານ ເພິ່ງໃຫ້ທັກຂີໄນຍະບຸກຄົນຍິນດີໄດ້ແນ່ນອນ

(ມັນທັບພະຍະກຸມານຕັດວ່າ)

[໕] ເຮົາຮູ້ແຈ້ງເນື້ອນາບຸນເປັນທີ່ປະດິດສະຖານເມັດພືດທັງຫຼາຍໃນໂລກ
ເນື້ອນາບຸນ ຄື ພາມທັງຫຼາຍທີ່ເກີດໂດຍຊາດແລະມົນ
ນັບວ່າເປັນເນື້ອນາບຸນທີ່ມີສິນເປັນທີ່ຮັກຍິ່ງ

(ພຣະໂພທິສັດຂາບທູນວ່າ)

[໖] ກໍ ອະຄຸນນະທຳເຫຼົ່ານີ້ ຄື ຄວາມເມົາເພາະຊາດ ໑
ຄວາມມີມານະຈັດ ໑ ໂລພະ ໑ ໂທສະ ໑
ມະທະ ໑ ໂມຫະ ໑ ທຸກຢ່າງມີຢູ່ໃນເນື້ອນາບຸນເຫຼົ່າໃດ
ເນື້ອນາບຸນເຫຼົ່ານັ້ນນັບວ່າເປັນເນື້ອນາບຸນທີ່ບໍ່ມີສິນເປັນທີ່ຮັກໃນໂລກ

[໗] ອະຄຸນນະທຳເຫຼົ່ານີ້ ຄື ຄວາມເມົາເພາະຊາດ ໑
ຄວາມມີມານະຈັດ ໑ ໂລພະ ໑ ໂທສະ ໑
ມະທະ ໑ ໂມຫະ ໑ ທຸກຢ່າງບໍ່ມີຢູ່ໃນເນື້ອນາບຸນເຫຼົ່າໃດ
ເນື້ອນາບຸນເຫຼົ່ານັ້ນນັບວ່າເປັນເນື້ອນາບຸນທີ່ມີສິນເປັນທີ່ຮັກໃນໂລກ

(ເມື່ອພຣະໂພທິສັດກ່າວຄວາມນີ້ຊ້ຳອີກ ມັນທັບພະຍະກຸມານຊົງໂກດແລ້ວຕັດວ່າ)

[໘] ເຈົ້າອຸປະໂຊຕິຍະ ເຈົ້າອຸປັດຊາຍະ
ແລະເຈົ້າພັນທະກຸດສິໄປໃສກັນໝົດ
ພວກເຈົ້າຈົ່ງຄັ້ງນຕີ ຈົ່ງທຳຮ້າຍເຈົ້າດາບົດນີ້
ແລ້ວຈັບຄໍເຈົ້າຄົນຊົ່ວເອົາມັນອອກໄປ

(ພຣະໂພທິສັດເຫາະໄປຢູ່ໃນອາກາດຂາບທູນວ່າ)

[໙] ພຣະອົງຊົງດ່າວ່າລືສີຊື່ວ່າຂຸດພູເຂົາດ້ວຍເລັບ
ຫຍ້ຳກິນກ້ອນເຫຼັກດ້ວຍແຂ້ວແລະພະຍາຍາມກືນກິນໄຟ

(ພຣະສາດສະດາຊົງປະກາດຂໍ້ຄວາມນັ້ນວ່າ)

[໑໐] ມາຕັງຄະ ລືສີເມື່ອກ່າວຢ່າງນີ້ແລ້ວ
ມີຄວາມບາກບັ່ນແນ່ວແນ່ໃນສັດຈະ
ເມື່ອພາມທັງຫຼາຍເຫັນຢູ່ ໄດ້ເຫາະໜີໄປໃນອາກາດ

(ນາງທິດຖະມັງຄະລິກາຟ້າວສະເດັດໄປໂດຍໄວເຫັນວ່າ)

[໑໑] ຫົວບິດກັບໄປຂ້າງຫຼັງ
ແຂນກາງອອກໃຊ້ການບໍ່ໄດ້
ຕາຂາວເໝືອນຕາຂອງຄົນຕາຍແລ້ວ
ໃຜນໍໄດ້ກະທໍາບຸດຂອງຂ້ານ້ອຍນີ້ໃຫ້ເປັນແນວນີ້

(ຊົນຜູ້ຢູ່ໃນບ່ອນນັ້ນບອກນາງວ່າ)

[໑໒] ສະມະນະນຸ່ງຜ້າເກົ່າຂາດອຸ້ຍຍຸ້ຍ ເໝືອນຜີສາດເປື້ອນຝຸ່ນ
ສວມໃສ່ເສດຜ້າຈາກກອງຂີ້ເຫຍື້ອໄວ້ພັນເຖິງຄໍໄດ້ມາໃນບ່ອນນີ້
ສະມະນະທ່ານນັ້ນໄດ້ກະທໍາບຸດຂອງທ່ານນີ້ໃຫ້ເປັນແນວນີ້

(ນາງທິດຖະມັງຄະລິກາຖາມວ່າ)

[໑໓] ທ້າວມານົບ ສະມະນະຜູ້ມີປັນຍາພຽງດັ່ງແຜ່ນດິນ
ໄດ້ໄປສູ່ທິດໃສສາແລ້ວ
ຂໍທ່ານໂຜດບອກເນື້ອຄວາມນັ້ນແກ່ຂ້າພະເຈົ້າ
ຂ້າພະເຈົ້າຈະໄປຂໍໂທດທ່ານ
ເຮັດແນວໃດ ຂ້າພະເຈົ້າຈຶ່ງຈະໄດ້ຊີວິດຂອງບຸດນັ້ນຄືນມາ

(ມານົບທັງຫຼາຍຜູ້ຢູ່ໃນບ່ອນນັ້ນບອກວ່າ)

[໑໔] ລືສີຜູ້ມີປັນຍາພຽງດັ່ງແຜ່ນດິນໄດ້ເຫາະໄປ
ດັ່ງພຣະຈັນໃນວັນເພັງລອຍຢູ່ທ່າມກາງນະພາກາດ
ອີກຢ່າງໜຶ່ງ ລືສີຜູ້ເປັນຄົນດີແມ່ນຕົນນັ້ນ
ປະຕິບຍາໝັ້ນຢູ່ດ້ວຍສັດຈະ ໄດ້ໄປທາງທິດບູລະພາ

(ນາງທິດຖະມັງຄະລິກາຈະຖາມພຣະໂພທິສັດວ່າ)

[໑໕] ຫົວບິດກັບໄປຂ້າງຫຼັງ
ແຂນກາງອອກໃຊ້ການບໍ່ໄດ້
ຕາຂາວເໝືອນຕາຂອງຄົນຕາຍແລ້ວ
ໃຜນໍໄດ້ກະທໍາບຸດຂອງຂ້ານ້ອຍນີ້ໃຫ້ເປັນແນວນີ້

(ພຣະໂພທິສັດມາຕັງຄະບັນດິດກ່າວຕອບນາງວ່າ)

[໑໖] ຍັກທັງຫຼາຍຜູ້ມີອານຸພາບຫຼາຍຍັງມີຢູ່ແລ

ກໍຍັກເຫຼົ່ານັ້ນໄດ້ຕິດຕາມລືສີທັງຫຼາຍຜູ້ເປັນຄົນດີ
ຮູ້ວ່າບຸດຂອງທ່ານມີຈິດປະທຸດສະຮ້າຍ
ຈຶ່ງໄດ້ເຮັດໃຫ້ເປັນແນວນີ້

(ນາງທິດຖະມັງຄະລິກາ ກ່າວວ່າ)

[໑໗] ກໍຍັກທັງຫຼາຍໄດ້ກະທຳບຸດຂອງຂ້ານ້ອຍໃຫ້ເປັນແນວນີ້
ສ່ວນພຣະຜູ້ເປັນເຈົ້າຜູ້ປະພຶດພົມມະຈັນຢ່າໂກດບຸດຂ້ານ້ອຍເລີຍ
ພຣະຜູ້ເປັນເຈົ້າຜູ້ເຫັນໄພໃນວັດຕະສົງສານຂ້ານ້ອຍຂໍເຖິງພຣະຜູ້ເປັນເຈົ້າ
ທີ່ນັ້ນເປັນບ່ອນເພິ່ງບ່ອນຣະນຶກເປັນບາດເບື້ອງຕົ້ນ
ຂ້ານ້ອຍໄດ້ຕິດຕາມມາດ້ວຍຄວາມເປັນຫ່ວງເຖິງບຸດ

(ພຣະໂພທິສັດມາຕັງຄະ ບັນດິດກ່າວວ່າ)

[໑໘] ທັງໃນການນັ້ນ ທັງດຽວນີ້ ການຄິດປະທຸດສະຮ້າຍທາງໃຈບາງຢ່າງ
ຂອງອາດຕະມາກໍບໍ່ມີແກ່ຜູ້ໃດ
ສ່ວນບຸດຂອງທ່ານເປັນຜູ້ມົວເມົາເພາະຄວາມເມົາໃນພຣະເວດ
ຮຽນຈົບພຣະເວດແລ້ວກໍບໍ່ຮູ້ຈັກປະໂຫຍດ

(ນາງທິດຖະມັງຄະລິກາກ່າວວ່າ)

[໑໙] ແນ່ນອນ ທ່ານຜູ້ເຫັນໄພໃນວັດຕະສົງສານ
ທຳມະດາຄົນເຮົາ ສັນຍາຍ່ອມເລືອນໄປພຽງບໍ່ດົນ
ພຣະຜູ້ເປັນເຈົ້າຜູ້ມີປັນຍາພຽງດັ່ງແຜ່ນດິນ
ຂໍພຣະຜູ້ເປັນເຈົ້າຈົ່ງອົດໂທດເທື່ອນີ້ແກ່ຂ້ານ້ອຍດ້ວຍເທີ້ນ
ບັນດິດທັງຫຼາຍຍ່ອມບໍ່ມີຄວາມໂກດຮຸນແຮງ

(ພຣະໂພທິສັດມາຕັງຄະ ບັນດິດຜູ້ຖືກນາງທິດຖະມັງຄະລິກາ ອ້ອນວອນຂໍໂທດໃຫ້ບຸດຈຶ່ງກ່າວວ່າ)

[໒໐] ນີ້ກ້ອນເຂົ້າທີ່ອາດຕະມາສັນເຫຼືອ
ມັນທັບພະຍະບຸດຂອງທ່ານຜູ້ມີປັນຍາໜ້ອຍຈົ່ງບໍຣິໂພກ
ຍັກທັງຫຼາຍບໍ່ເພິ່ງບຽດບຽນມັນທັບພະຍະບຸດຂອງທ່ານ
ແລະບຸດຂອງທ່ານຈັກເປັນຜູ້ບໍ່ມີພະຍາດ

(ລຳດັບນັ້ນ ມານດາກ່າວກັບບຸດວ່າ)

[໔໑] ທ້າວມັນທັບພະຍະ ເຈົ້າເປັນຄົນໂງ່ຈ້າເບົາປັນຍາ
ບໍ່ສະຫຼາດຕໍ່ບຸກຄົນຜູ້ເປັນເນື້ອນາບຸນ
ໄດ້ໃຫ້ທານໃນບຸກຄົນຜູ້ມີກິເລດພຽງດັ່ງນ້ຳຝາດເປັນຈຳນວນຫຼາຍ
ຜູ້ມີວຽກງານເສົ້າໝອງ ບໍ່ສັງລວມ

[໔໔] ບາງພວກເກົ້າຜົມເປັນຊະດາ ບາງພວກນຸ່ງໜັງສັດ
ບາງພວກປາກມີໜວດຮຸງຮັງເໝືອນນ້ຳສ້າງເກົ່າ
ເຈົ້າຈົ່ງເບິ່ງໝູ່ຊົນນີ້ ມີຮູບຊາມ
ມວຍຜົມແລະໜັງສັດຄຸ້ມຄອງຄົນມີປັນຍາຊາມບໍ່ໄດ້

[໔໓] ຊົນເຫຼົ່າໃດຄາຍຣາຄະ ໂທສະ ແລະອະວິດຊາໄດ້ແລ້ວ
ຊົນເຫຼົ່ານັ້ນມີອາສະວະສິ້ນແລ້ວ ເປັນພຣະອະຣະຫັນ
ທານທີ່ບຸກຄົນຖວາຍແລ້ວໃນທ່ານເຫຼົ່ານັ້ນມີຜົນຫຼາຍ

**ມາຕັງຄະຊາດົກທີ ໑ ຈົບ**

## ໔. ຈິດຕະສຳພູຕະຊາດົກ (໔໙໘)
## ວ່າດ້ວຍຈິດຕະບັນດິດກັບພຣະເຈົ້າສຳພູຕະບັນດິດ

(ພຣະຣາຊາຊົງຂັບເພງຂັບວ່າ)

[໔໔] ກຳທຸກຢ່າງທີ່ນໍຣະຊົນປະພຶດດີແລ້ວມີຜົນ
ຜົນກຳເຖິງຈະເລັກໜ້ອຍ ຊື່ວ່າເປັນໂມຄະນັ້ນບໍ່ແມ່ນ
ເຮົາເຫັນສັດຜູ້ເກີດມາມີອານຸພາບຫຼາຍ
ເຊິ່ງເກີດແຕ່ຜົນບຸນ ຍ້ອນກຳຂອງຕົນ

[໔໕] ກຳທຸກຢ່າງທີ່ນໍຣະຊົນປະພຶດດີແລ້ວມີຜົນ
ຜົນກຳເຖິງຈະເລັກໜ້ອຍຊື່ວ່າເປັນໂມຄະນັ້ນບໍ່ແມ່ນ
ແມ່ນທ່ານຈິດຕະບັນດິດມີມະໂນລົດສຳເລັດສົມປາຖະໜາ
ເໝືອນຢ່າງເຮົາຢູ່ບໍ?

(ເມື່ອພຣະເຈົ້າສຳພູຕະຊົງຂັບເພງຈົບລົງ ກຸມານຂັບເພງຕອບຖວາຍພຣະຣາຊາວ່າ)

[໔໕] ກຳທຸກຢ່າງທີ່ບໍ່ຣະຊົນປະພຶດດີແລ້ວມີຜົນ
ຜົນກຳເຖິງຈະເລັກໜ້ອຍຊື່ວ່າເປັນໂມຄະນັ້ນບໍ່ແມ່ນ
ຂໍເດຊະພຣະອົງຜູ້ສົມມຸດຕິເທບ ແມ່ນຈິດຕະບັນດິດພຣະອົງກໍໂຜດ
ຮູ້ເທີ້ນວ່າ ທ່ານມີມະໂນລົດສຳເລັດສົມປາຖະໜາເໝືອນພຣະອົງ

(ພຣະເຈົ້າສຳພູຕະຊົງສະດັບແລ້ວ ຈຶ່ງຕັດວ່າ)

[໔໖] ເຈົ້າເປັນຈິດຕະດາບົດແມ່ນບໍ
ຫຼືວ່າເຈົ້າຟັງມາຈາກຄົນອື່ນ
ຫຼືໃຜໄດ້ບອກເລື້ອງນັ້ນກັບເຈົ້າຄາຖາເຈົ້າຂັບດີແລ້ວ
ເຮົາບໍ່ມີຄວາມສົງໄສ ແລະເຮົາຈະໃຫ້ບ້ານສ່ວຍແກ່ເຈົ້າ ໑໐໐ ຫຼັງ

(ລຳດັບນັ້ນ ກຸມານຂາບທູນວ່າ)

[໔໗] ຂ້າພຣະອົງບໍ່ແມ່ນຈິດຕະລືສີ ແລະຂ້າພຣະອົງບໍ່ໄດ້ຟັງມາຈາກຄົນອື່ນ
ແຕ່ລືສີໄດ້ບອກເນື້ອຄວາມນີ້ແກ່ຂ້າພຣະອົງວ່າ
ເຈົ້າຈົ່ງໄປ ຈົ່ງຂັບຄາຖາຕອບພຣະຣາຊາ
ພຣະຣາຊາຊົງພໍພຣະທະໄທ ເພິ່ງພຣະຣາດຊະທານພອນແກ່ເຈົ້າແນ່ນອນ

(ພຣະເຈົ້າສຳພູຕະຊົງສະດັບແລ້ວຈຶ່ງຮັບສັ່ງໃຫ້ພວກຣາດຊະບຸຣຸດກຽມກະບວນວ່າ)

[໔໘] ພວກພະນັກງານຈົ່ງກຽມຣາດຊະລົດທີ່ຕົກແຕ່ງສວຍງາມ
ຫຍິບປັກຢ່າງວິຈິດຕະການຕາ ຈົ່ງຜູກສາຍຮັດສັບປະຄັບຊ້າງ
ສວມເຄື່ອງປະດັບຄໍ

[໕໐] ຊາວພະນັກງານຈົ່ງນຳກອງ ຕະໂພນ ແລະຫອຍສັງມາ
ແລະຈົ່ງກຽມຣາດຊະຍານທີ່ໄວ
ວັນນີ້ ເຮົາຈັກໄປສູ່ອາສົມທີ່ເຮົາເຫັນລືສີນັ່ງຢູ່

(ພຣະເຈົ້າສຳພູຕະສະເດັດເຂົ້າໄປຫາຈິດຕະບັນດິດດາບົດ ຊົງດີພຣະທະໄທແລ້ວຕັດວ່າ)

[໕໑] ຂ້າພະເຈົ້າເປັນຜູ້ໄດ້ລາບດີແລ້ວນໍ
ຄາຖາອັນເຂົາຂັບດີແລ້ວໃນທ່າມກາງບໍລິສັດ
ຂ້າພະເຈົ້ານັ້ນມີປິຕິແລະໂສມະນັດຍ້ອນໄດ້ເຫັນລືສີຜູ້ສົມບູນດ້ວຍສິນແລະຂໍ້ວັດ

(ຕັ້ງແຕ່ໄດ້ພົບຈິດຕະບັນດິດດາບົດ ພຣະເຈົ້າສໍາພູຕະຊົງໂສມະນັດ ຈຶ່ງຮັບສັ່ງພວກ ຣາດຊະບຸຣຸດໃຫ້ກຽມສະຖານທີ່ແລ້ວຕັດວ່າ)

[໓໔] ຂໍພຣະຜູ້ເປັນເຈົ້າຜູ້ຈະເລີນຈົ່ງຮັບອາສະນະນໍ້າ
ແລະຜ້າເຊັດຕີນຂອງຂ້າພະເຈົ້າເທີ້ນ
ຂ້າພະເຈົ້າຂໍຖວາຍຂອງມີຄ່າຕ້ອນຮັບພຣະຜູ້ເປັນເຈົ້າຜູ້ຈະເລີນ
ຂໍພຣະຜູ້ເປັນເຈົ້າຜູ້ຈະເລີນຈົ່ງໃຊ້ສອຍຂອງທີ່ມີຄ່າຂອງຂ້າພະເຈົ້າດ້ວຍເທີ້ນ

(ພຣະເຈົ້າສໍາພູຕະເມື່ອຈະຊົງແບ່ງຣາດຊະສົມບັດຖວາຍເຄິ່ງໜຶ່ງຈຶ່ງຕັດວ່າ)

[໓໓] ຂໍພຣະອົງຈົ່ງສ້າງພຣະຕໍາໜັກທີ່ໜ້າຣື່ນຣົມສໍາລັບພຣະອົງ
ຂໍພຣະອົງຊົງໃຫ້ໝູ່ນາຣີບໍາເລີເທີ້ນ
ແລະຈົ່ງໃຫ້ໂອກາດເພື່ອອະນຸເຄາະຂ້າພະເຈົ້າ
ແມ່ນເຮົາທັງ ໔ ຈະຄອບຄອງຄວາມເປັນໃຫຍ່ຮ່ວມກັນ

(ຈິດຕະບັນດິດດາບົດຂາບທູນວ່າ)

[໓໔] ຂໍຖວາຍພຣະພອນມະຫາບໍພິດ ອາດຕະມາເຫັນຜົນຂອງທຸດຈະຣິດ
ແລະວິບາກຍິ່ງໃຫຍ່ແຫ່ງທໍາທີ່ປະພຶດດີແລ້ວຈັກສັງລວມຕົນຢ່າງດຽວ
ຈຶ່ງບໍ່ປາຖະໜາບຸດ ປະສຸສັດ ຫຼືຊັບ

[໓໕] ຊີວິດຂອງສັດທັງຫຼາຍໃນໂລກນີ້ພຽງ ໑໐ ປີທໍ່ນັ້ນ
ຊີວິດນັ້ນຍັງບໍ່ທັນເຖິງເຂດກໍານົດຊູບຊີດໄປເໝືອນຕົ້ນອໍ້ທີ່ຖືກຕັດ

[໓໖] ໃນສະພາບຊີວິດຢ່າງນັ້ນຈະເພີດເພີນ ຈະຫຼິ້ນສະໜຸກສະໜານ
ຈະມ່ວນຊື່ນ ຈະສະແຫວງຫາຊັບໄປເຮັດຫຍັງ
ປະໂຫຍດອັນໃດດ້ວຍບຸດແລະພັນລະຍາສໍາລັບອາດຕະມາ
ອາດຕະມາພົ້ນແລ້ວຈາກເຄື່ອງຜູກມະຫາບໍພິດ

[໓໗] ອາດຕະມານັ້ນຮູ້ແຈ້ງແນວນີ້ວ່າ
ມັດຈຸຣາດຈະບໍ່ເມີນເສີຍຕໍ່ອາດຕະມາ
ຜູ້ຖືກຄວາມຕາຍຄອບງໍາຈະມ່ວນຊື່ນ
ຈະສະແຫວງຫາຊັບໄປເຮັດຫຍັງ

[໓໘] ຂໍເດຊະພຣະອົງຜູ້ຈອມຊົນ

ຊາດກຳເນີດຂອງນໍຣະຊົນບໍ່ສະໝໍ່າສະເໝີ
ໃນໝູ່ມະນຸດ ກຳເນີດແຫ່ງຄົນຈັນທານນັບວ່າຕ່ຳຕ້ອຍທີ່ສຸດ
ໃນຊາດກ່ອນ ພວກເຮົາໄດ້ອາໄສຢູ່ໃນທ້ອງຂອງຍິງຈັນທານ
ຍ້ອນກຳຊົ່ວຊ້າຂອງຕົນ

[໓໙] ພວກເຮົາໄດ້ເກີດເປັນຄົນຈັນທານໃນອະວັນຕີຊົນນະບົດ
ໄດ້ເກີດເປັນເນື້ອຢູ່ທີ່ຝັ່ງແມ່ນ້ຳເນຣັນຊະຣາ
ໄດ້ເກີດເປັນນົກເຂົາຢູ່ທີ່ຝັ່ງແມ່ນ້ຳນຳມະທາ
ແຕ່ວັນນີ້ເຮົາທັງ ໒ ນັ້ນເປັນພາມແລະກະສັດ

(ຈິດຕະບັນດິດດາບົດເມື່ອໃຫ້ພຣະເຈົ້າສຳພູຕະເກີດອຸດສາຫະໃນບຸນກຸສົນທັງຫຼາຍຈຶ່ງກ່າວວ່າ)

[໔໐] ຊີວິດຖືກຊະຣານຳເຂົ້າໄປໃກ້ມໍລະນະ ອາຍຸຂອງເຫຼົ່າສັດມີໜ້ອຍດຽວ
ຊີວິດທີ່ຖືກຊະຣານຳໄປ ຍ່ອມບໍ່ມີຜູ້ຕ້ານທານ
ຂໍຖວາຍພຣະພອນພຣະເຈົ້າປັນຈາລະ
ຂໍມະຫາບໍພິດຈົ່ງຊົງເຮັດຕາມຄຳຂອງອາດຕະມາ
ມະຫາບໍພິດຢ່າໄດ້ຊົງເຮັດກຳເຊິ່ງມີທຸກເປັນກຳໄລເລີຍ

[໔໑] ຊີວິດຖືກຊະຣານຳເຂົ້າໄປໃກ້ມໍລະນະ ອາຍຸຂອງເຫຼົ່າສັດມີໜ້ອຍດຽວ
ຊີວິດທີ່ຖືກຊະຣານຳໄປ ຍ່ອມບໍ່ມີຜູ້ຕ້ານທານ
ຂໍຖວາຍພຣະພອນພຣະເຈົ້າປັນຈາລະ
ຂໍມະຫາບໍພິດຈົ່ງຊົງເຮັດຕາມຄຳຂອງອາດຕະມາ
ມະຫາບໍພິດຢ່າໄດ້ຊົງເຮັດກຳເຊິ່ງມີທຸກເປັນຜົນເລີຍ

[໔໒] ຊີວິດຖືກຊະຣານຳເຂົ້າໄປໃກ້ມໍລະນະ ອາຍຸຂອງເຫຼົ່າສັດມີໜ້ອຍດຽວ
ຊີວິດທີ່ຖືກຊະຣານຳໄປຍ່ອມບໍ່ມີຜູ້ຕ້ານທານ
ຂໍຖວາຍພຣະພອນພຣະເຈົ້າປັນຈາລະ
ຂໍມະຫາບໍພິດຈົ່ງຊົງເຮັດຕາມຄຳຂອງອາດຕະມາ
ມະຫາບໍພິດຢ່າໄດ້ຊົງເຮັດກຳເຊິ່ງມີທຸລີແປດເປື້ອນເທິງພຣະສຽນເລີຍ
[໔໓] ຊີວິດຖືກຊະຣານຳເຂົ້າໄປໃກ້ມໍລະນະ ອາຍຸຂອງເຫຼົ່າສັດມີໜ້ອຍດຽວ
ຊະຣາຍ່ອມກຳຈັດຜິວພັນຂອງນໍຣະຊົນຜູ້ແກ່ຊະຣາ
ຂໍຖວາຍພຣະພອນພຣະເຈົ້າປັນຈາລະ
ຂໍມະຫາບໍພິດຈົ່ງຊົງເຮັດຕາມຄຳຂອງອາດຕະມາ
ມະຫາບໍພິດຢ່າໄດ້ຊົງເຮັດກຳເພື່ອເກີດໃນນະຣົກເລີຍ

(ເມື່ອພຣະໂພທິສັດກ່າວແນວນັ້ນ ພຣະຣາຊາຊົງຍິນດີແລ້ວຈຶ່ງຕັດວ່າ)

[໔໔] ຄຳຂອງພຣະອົງນັ້ນເປັນຄຳສັດຢ່າງແທ້ຈິງ
ຄຳນັ້ນເປັນເໝືອນດັ່ງທີ່ລືສີກ່າວ
ແຕ່ກາມຂອງຂ້ານ້ອຍມີຢູ່ບໍ່ແມ່ນໜ້ອຍ
ຂ້າແດ່ທ່ານຜູ້ເຫັນໄພໃນວັດຕະສົງສານ
ກາມເຫຼົ່ານັ້ນຄົນເຊັ່ນຂ້ານ້ອຍລະໄດ້ຍາກ

[໔໕] ຂ້ານ້ອຍຈົມຢູ່ໃນເປືອກຕົມຄືກາມ
ບໍ່ອາດດຳເນີນຕາມທາງຂອງພິກຂຸໄດ້
ເໝືອນຊ້າງເຊືອກທີ່ຈົມຢູ່ໃນທ່າມກາງເປືອກຕົມ
ເຫັນບ່ອນເນີນຢູ່ກໍບໍ່ອາດຈະໄປໄດ້

[໔໖] ມານດາບິດາພໍ່າສອນບຸດດ້ວຍຫວັງວ່າ
ເຂົາຈະມີຄວາມສຸກໄດ້ແນວໃດ ແມ່ນສັນໃດ
ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນພຣະອົງກໍສັນນັ້ນ ພໍ່າສອນຂ້ານ້ອຍ
ໂດຍທີ່ຂ້ານ້ອຍລະໂລກນີ້ໄປແລ້ວຈະເພິ່ງເປັນສຸກສິ້ນການລະນານ

(ພຣະໂພທິສັດມາຕັງຄະບັນດິດຖວາຍພຣະພອນວ່າ)

[໔໗] ຂໍຖວາຍພຣະພອນພຣະອົງຜູ້ຈອມຊົນ
ຫາກມະຫາບໍພິດບໍ່ຊົງສາມາດຈະລະກາມເຊິ່ງເປັນຂອງມະນຸດເຫຼົ່ານີ້ໄດ້
ຂໍພຣະອົງຊົງຕັ້ງການບູຊາທີ່ເປັນທຳເທີ້ນ ມະຫາບໍພິດ
ອັນໜຶ່ງ ການກະທຳທີ່ບໍ່ເປັນທຳຂໍຢ່າໄດ້ມີໃນແຄວ້ນຂອງພຣະອົງເລີຍ

[໔໘] ຂໍພວກທູດຈົ່ງທ່ຽວໄປນິມົນສະມະນະແລະພາມທັງຫຼາຍ
ທົ່ວທິດທັງ ໔ ມະຫາບໍພິດ ຂໍຊົງບຳຣຸງສະມະນະແລະພາມ
ເຫຼົ່ານັ້ນດ້ວຍເຂົ້າ ນໍ້າ ຜ້າ ເສນາສະນະ ແລະປັດໄຈ

[໔໙] ພຣະອົງຜູ້ມີພຣະທະໄທເຫຼື້ອມໃສ
ຊົງລ້ຽງສະມະນະແລະພາມທັງຫຼາຍໃຫ້ອີ່ມໜຳດ້ວຍເຂົ້າແລະນໍ້າ
ຊົງຖວາຍແລະຊົງສະເຫວີຍຕາມຄວາມສາມາດ ຈະບໍ່ຖືກນິນທາ
ຂໍຊົງເຂົ້າເຖິງແດນສະຫວັນເທີ້ນ

[໕໐] ມະຫາບໍພິດ ຫາກວ່າຄວາມເມົາເພິ່ງຄອບງຳພຣະອົງ

ເຊິ່ງມີໝູ່ນາຣີບຳເລີຢູ່ ຂໍພຣະອົງຊົງມະນະສິການຄາຖານີ້
ແລະຂໍຈົ່ງຕັດຄາຖານີ້ໃນທ່າມກາງບໍລິສັດ

[໕໑] ສັດຜູ້ນອນຢູ່ກາງແຈ້ງ
ມີຍິງຈັນທານຜູ້ເມື່ອຈະໄປປ່າໃຫ້ດື່ມນ້ຳນົມ
ແລ້ວຄຸກຄີຢູ່ກັບຝູງໝາ
ສັດນັ້ນວັນນີ້ເຂົາຮຽກກັນວ່າ ພຣະຣາຊາ

**ຈິດຕະສຳພູຕະຊາດົກທີ ໘ ຈົບ**

## ໙. ສີວິຣາຊະຊາດົກ (໔໙໙)
## ວ່າດ້ວຍພຣະເຈົ້າສີພີ

(ທ້າວສັກກະເທວະຣາດທູນຂໍດວງພຣະເນດກັບພຣະຣາຊາວ່າ)

[໕໘] ຂ້າພຣະອົງເປັນຄົນເຖົ້າເບິ່ງເຫັນໄດ້ບໍ່ໄກ
ມາເພື່ອທູນຂໍພຣະຈັກຂຸເຮົາທັງ ໘ ຈັກມີຕາຄົນລະຂ້າງ
ຂ້າພຣະອົງທູນຂໍແລ້ວ
ຂໍພຣະອົງໂຜດພຣະຣາດຊະທານພຣະຈັກຂຸແກ່ຂ້າພຣະອົງເທີ້ນ

(ພຣະໂພທິສັດໄດ້ສະດັບດັ່ງນັ້ນຊົງດີພຣະທະໄທ ຈຶ່ງຕັດວ່າ)

[໕໙] ວະນິພົກໃຜແນະນຳເຈົ້າໃຫ້ມາຂໍດວງຕາໃນທີ່ນີ້
ເຈົ້າຂໍດວງຕາເຊິ່ງເປັນອະໄວຍະວະສຳຄັນຍາກທີ່ຈະສະລະໄດ້ງ່າຍ
ທີ່ບັນດິດກ່າວໄວ້ວ່າ ເປັນຂອງທີ່ຄົນສະລະໄດ້ຍາກ

(ທ້າວສັກກະເທວະຣາດຕັດວ່າ)

[໕໔] ທ່ານຜູ້ໃດ ໃນເທວະໂລກເຂົາຮຽກກັນວ່າ ສຸຊຳບໍດີ
ທ່ານຜູ້ນັ້ນ ໃນມະນຸດໂລກເຂົາຮຽກກັນວ່າ ມັກຄະວານ
ຂ້າພຣະອົງເປັນວະນິພົກ
ທ່ານຜູ້ນັ້ນແນະນຳໃຫ້ມາຂໍພຣະຣາດຊະທານດວງພຣະເນດໃນທີ່ນີ້

[໕໕] ເມື່ອຂ້າພຣະອົງທູນວິງວອນຂໍ
ພຣະຣາດຊະທານອະໄວຍະວະອັນສຳຄັນຢູ່

ຂໍພຣະອົງຜູ້ຖືກຂໍໂຜດພຣະຣາດຊະທານ
ດວງພຣະເນດແກ່ຂ້າພຣະອົງດ້ວຍເທີ້ນ
ຂໍພຣະອົງໂຜດພຣະຣາດຊະທານດວງພຣະເນດເຊິ່ງເປັນອະໄວຍະວະທີ່ສຳຄັນ
ທີ່ບັນດິດກ່າວໄວ້ວ່າຄົນສະລະໄດ້ຍາກ ແກ່ຂ້າພຣະອົງເທີ້ນ

(ພຣະຣາຊາຕັດວ່າ)

[໕໖] ເຈົ້າມາດ້ວຍຄວາມປະສົງອັນໃດ
ປາຖະໜາປະໂຫຍດອັນໃດຢູ່
ຂໍຄວາມດຳຣິເຫຼົ່ານັ້ນຈົ່ງສຳເລັດແກ່ເຈົ້າ
ພາມ ເຈົ້າຈົ່ງໄດ້ດວງຕາໄປເທີ້ນ

[໕໗] ເມື່ອເຈົ້າຂໍຂ້າງດຽວ ເຮົາຈະໃຫ້ທັງ ໒ ຂ້າງ
ເມື່ອປະຊາຊົນເພ່ງເບິ່ງຢູ່ ເຈົ້າຈົ່ງເປັນຜູ້ມີດວງຕາໄປເທີ້ນ
ເຈົ້າປາຖະໜາສິ່ງໃດ ຂໍສິ່ງນັ້ນຈົ່ງສຳເລັດແກ່ເຈົ້າ

(ຂ້າຣາດຊະການມີເສນາບໍດີເປັນຕົ້ນ ຣາດຊະວັນລົບ ຊາວພຣະນະຄອນ ແລະ ນາງສະໜົມ ຂາບທູນຄັດຄ້ານວ່າ)

[໕໘] ຂໍເດຊະພຣະອົງຜູ້ສົມມຸດຕິເທບຂອງຂ້າພຣະອົງທັງຫຼາຍ
ຂໍພຣະອົງຢ່າໄດ້ພຣະຣາດຊະທານດວງພຣະເນດເລີຍ
ຢ່າຊົງລະຖິ້ມພວກຂ້າພຣະອົງທັງປວງໄປເລີຍ
ຂໍເດຊະພຣະມະຫາຣາດ ຂໍພຣະອົງພຣະຣາດຊະທານຊັບ
ແກ້ວມຸກດາແລະແກ້ວໄພທູນຈຳນວນຫຼາຍໄປແທນເທີ້ນ

[໕໙] ຂໍເດຊະພຣະອົງຜູ້ສົມມຸດຕິເທບ
ຂໍພຣະອົງຈົ່ງພຣະຣາດຊະທານຣາດຊະລົດ
ທີ່ທຽມດ້ວຍມ້າອາຊາໄນ ເຊິ່ງປະດັບຕົບແຕ່ງແລ້ວ
ຂໍພຣະອົງຈົ່ງພຣະຣາດຊະທານພະຍາຊ້າງ
ແລະບ່ອນຢູ່ອາໄສທີ່ເຮັດດ້ວຍຄຳເທີ້ນ

[໖໐] ຂໍເດຊະພຣະອົງຜູ້ຈອມທັບ
ຂໍພຣະອົງຈົ່ງພຣະຣາດຊະທານສິ່ງຂອງໃຫ້ພາມ
ເໝືອນກັບຊາວເມືອງສີພີທີ່ມີຍານພາຫະນະແລະລົດ
ເພິ່ງຕາມສະເດັດແວດລ້ອມພຣະອົງໃນການທຸກເມື່ອ

(ລຳດັບນັ້ນ ພຣະຣາຊາໄດ້ຕັດ ໓ ຄາຖາວ່າ)

[໗໑] ຜູ້ໃດເວົ້າວ່າ ເຮົາຈັກໃຫ້ແລ້ວກັບໃຈບໍ່ໃຫ້
ຜູ້ນັ້ນຊື່ວ່າໃສ່ບ້ວງທີ່ຕົກລົງເທິງພື້ນດິນໄວ້ຢູ່ຄໍ

[໗໒] ຜູ້ໃດເວົ້າວ່າ ເຮົາຈັກໃຫ້ແລ້ວກັບໃຈບໍ່ໃຫ້
ຜູ້ນັ້ນເປັນຄົນຊົ່ວກວ່າຄົນທີ່ຊົ່ວ
ຊື່ວ່າເຂົ້າເຖິງສະຖານທີ່ລົງໂທດແຫ່ງພະຍາຍົມ

[໗໓] ເຂົາຂໍສິ່ງໃດ ຄວນໃຫ້ສິ່ງນັ້ນ
ເຂົາບໍ່ຂໍສິ່ງໃດ ບໍ່ຄວນໃຫ້ສິ່ງນັ້ນ
ເຮົາຈັກໃຫ້ສິ່ງທີ່ພານຂໍກັບເຮົາທີ່ນັ້ນ

(ລຳດັບນັ້ນ ພວກອຳມາດທູນຖາມພຣະຣາຊາວ່າ)

[໗໔] ຂໍເດຊະພຣະອົງຜູ້ຈອມຊົນ
ພຣະອົງຊົງປາຖະໜາອາຍຸ ວັນນະ ສຸກ
ຫຼືພະລະອັນໃດນໍ ຈຶ່ງໄດ້ພຣະຣາດຊະທານ
ພຣະຣາຊາຜູ້ເປັນໃຫຍ່ແຫ່ງຊາວສີພີ
ຈະເພິ່ງພຣະຣາດຊະທານດວງພຣະເນດ
ຍ້ອນເຫດແຫ່ງປະຣະໂລກໄດ້ແນວໃດ

(ພຣະຣາຊາຕັດວ່າ)

[໗໕] ເຮົາບໍລິຈາກດວງຕານັ້ນເພາະຍົດກໍຫາບໍ່ໄດ້
ເຮົາຈະປາຖະໜາບຸດ ຊັບ ແລະແຄວ້ນກໍຫາບໍ່ໄດ້
ແຕ່ນີ້ເປັນທຳຂອງສັດຕະບຸຣຸດທີ່ທ່ານປະພຶດມາແຕ່ບູຮານ
ຍ້ອນເຫດນັ້ນແລ ໃຈຂອງເຮົາຈຶ່ງຍິນດີໃນການໃຫ້ທານ
ດວງຕາທັງ ໒ ຂ້າງເຮົາຈະກຽດຊັງກໍຫາບໍ່ໄດ້
ຕົວຕົນເຮົາຈະກຽດຊັງກໍຫາບໍ່ໄດ້
ແຕ່ສັບພັນຍຸຕະຍານເປັນທີ່ຮັກຂອງເຮົາ
ຍ້ອນເຫດນັ້ນ ເຮົາຈຶ່ງໄດ້ບໍລິຈາກດວງຕາ

(ພຣະໂພທິສັດໄດ້ກຳຊັບນາຍແພດສີວິກະວ່າ)

[໖໖] ນາຍແພດສີວິກະ ທ່ານເປັນເພື່ອນ ເປັນມິດຂອງເຮົາ
ສຶກສາມາດີແລ້ວ ຈິ່ງເຮັດຕາມຄຳຂອງເຮົາໂດຍດີ
ເມື່ອເຮົາຍັງເຫັນຢູ່ ທ່ານຈິ່ງຄວັກດວງຕາ
ແລ້ວວາງໄວ້ໃນມືຂອງວະນິພົກນີ້

(ພຣະສາດສະດາຊົງປະກາດຂໍ້ຄວາມນັ້ນວ່າ)

[໖໗] ນາຍແພດສີວິກະຖືກພຣະເຈົ້າສີພີຊົງເຕືອນ
ຈຶ່ງທຳຕາມຮັບສັ່ງໄດ້ຄວັກດວງພຣະເນດຂອງພຣະຣາຊາແລ້ວ
ໄດ້ນ້ອມເຂົ້າໄປໃຫ້ແກ່ພາມ ພາມເປັນຄົນມີຕາດີ
ພຣະຣາຊາກັບກາຍເປັນຄົນມີພຣະເນດບອດໄປ
[໖໘] ຈາກວັນນັ້ນ ສອງສາມວັນຕໍ່ມາ
ເມື່ອດວງພຣະເນດມີຊີ້ນປົງຂຶ້ນມາ
ພຣະຣາຊາຜູ້ຊົງບຳຣຸງແຄວ້ນແຫ່ງຊາວເມືອງສີພີ
ໃຫ້ຈະເລີນຮຸ່ງເຮືອງພຣະອົງນັ້ນຊົງຮັບສັ່ງຫານາຍສາຣະຖີມາຕັດວ່າ
[໖໙] ນາຍສາຣະຖີ ເຈົ້າຈົ່ງຈັດທຽມຍານ
ທຽມສຳເລັດແລ້ວຈົ່ງບອກໃຫ້ຮູ້
ເຮົາຈະໄປສູ່ອຸທະຍານ ສະໂບກຂະຣະນີ ແລະຣາວປ່າ
[໗໐] ກໍພຣະຣາຊາໄດ້ສະເດັດເຂົ້າໄປ
ປະທັບນັ່ງຂັດສະມາທິທີ່ແຄມຝັ່ງສະໂບກຂະຣະນີ
ທ້າວສຸຊຳບໍດີສັກກະເທວະຣາດໄດ້ຊົງຜາກົດແກ່ພຣະອົງ
(ຝ່າຍທ້າວສັກກະເຊິ່ງພຣະໂພທິສັດໄດ້ຍິນສຽງພຣະບາດແລ້ວທູນຖາມ ຈຶ່ງຕັດວ່າ)

[໗໑] ລືສີເຈົ້າ ຂ້ານ້ອຍເປັນທ້າວສັກກະຜູ້ເປັນຈອມເທບ
ໄດ້ມາທີ່ສຳນັກຂອງພຣະອົງ
ຂໍພຣະອົງຈົ່ງຂໍພອນທີ່ພຣະອົງມີພຣະຫະໄທປາຖະໜາ

(ພຣະຣາຊາຕັດວ່າ)

[໗໔] ຂໍຖວາຍພຣະພອນທ້າວສັກກະ ຊັບຂອງອາດຕະມາກໍມີພຽງພໍ
ພົນນິກາຍແລະພຣະຄັງກໍມີບໍ່ແມ່ນໜ້ອຍ
ແຕ່ບັດນີ້ ອາດຕະມາເປັນຄົນຕາບອດຈຶ່ງພໍໃຈການຕາຍທໍ່ນັ້ນ

(ທ້າວສັກກະຕັດວ່າ)

[໗໓]        ພຣະມະຫາກະສັດຜູ້ຈອມມະນຸດ ຄຳເຫຼົ່າໃດເປັນຄຳສັດ
ຂໍພຣະອົງຈົ່ງຕັດຄຳເຫຼົ່ານັ້ນ
ເມື່ອພຣະອົງຕັດຄຳສັດ ດວງພຣະເນດຈັກຜາກົດມີອີກ

(ພຣະໂພທິສັດຜູ້ເປັນພຣະຣາຊາໄດ້ເຮັດສັດຈະກິຣິຍາວ່າ)

[໗໔]        ວະນິພົກມີໂຄດຕ່າງ ໆ ກັນເຫຼົ່າໃດພາກັນມາເພື່ອຈະຂໍກັບອາດຕະມາ
ບັນດາວະນິພົກເຫຼົ່ານັ້ນ ຜູ້ໃດຍ່ອມຂໍອາດຕະມາ
ແມ່ນຜູ້ນັ້ນຍ່ອມເປັນທີ່ຮັກແຫ່ງໃຈຂອງອາດຕະມາ
ດ້ວຍສັດຈະວາຈານີ້ ຂໍດວງຕາຈົ່ງເກີດຂຶ້ນແກ່ອາດຕະມາ

(ຕໍ່ມາໄດ້ຕັດອີກວ່າ)

[໗໕]        ພາມຜູ້ມາຂໍກັບອາດຕະມາແລ້ວວ່າ
ຂໍພຣະອົງໂຜດພຣະຣາດຊະທານດວງຕາຂ້າງໜຶ່ງເທີ້ນ
ອາດຕະມາໄດ້ປະທານດວງຕາໃຫ້ພາມເຊິ່ງຂໍຢູ່ນັ້ນໄປ ໒ ຂ້າງ

[໗໖]        ປີຕິແລະໂສມະນັດບໍ່ແມ່ນໜ້ອຍໄດ້ທ່ວມທັບໂດຍຍິ່ງ
ດ້ວຍສັດຈະວາຈານີ້ ຂໍດວງຕາດວງທີ ໒ ຈົ່ງເກີດຂຶ້ນແກ່ອາດຕະມາ

(ທ້າວສັກກະຊົງຊົມເຊີຍພຣະໂພທິສັດໃນທ່າມກາງມະຫາຊົນວ່າ)

[໗໗]        ພຣະອົງຜູ້ຊົງຜະດຸງແຄວັ້ນໃຫ້ຈະເລີນແກ່ຊາວເມືອງສີພີ
ພຣະອົງຕັດຄາຖາໂດຍທຳ
ດວງພຣະເນດຂອງພຣະອົງເຫຼົ່ານີ້ຈະຜາກົດເປັນທິບ

[໗໘]        ຈະໃຫ້ພຣະອົງສຳເລັດການເຫັນທະລຸຜ່ານພາຍນອກຝາ
ພາຍນອກກຳແພງສີລາແລະພູເຂົາໄປໄດ້ໄກເຖິງ ໑໐໐ ໂຍດໂດຍຮອບ

(ພຣະໂພທິສັດສະແດງທຳວ່າ)

[໗໙]        ໃນໂລກນີ້ ໃຜບໍ່ຖືກເຂົາຂໍແລ້ວ
ບໍ່ເພິ່ງໃຫ້ຊັບເຄື່ອງພໍໃຈ
ທັງວິເສດ ທັງເປັນທີ່ຮັກຍິ່ງຂອງຕົນ
ເອົາເທີ້ນ ເຮົາຂໍເຕືອນຊາວສີພີທຸກຄົນທີ່ມາປະຊຸມພ້ອມກັນ
ຂໍພວກທ່ານຈົ່ງເບິ່ງດວງຕາທັງ ໒ ເຊິ່ງເປັນທິບຂອງເຮົາໃນວັນນີ້

[໗໐] ຈະໃຫ້ເຮົາສຳເລັດການເຫັນທະລຸຜ່ານພາຍນອກຝາ
ພາຍນອກກຳແພງສິລາແລະພູ
ໄປໄດ້ໄກເຖິງ ໑໐໐ ໂຍດໂດຍຮອບ

[໗໑] ບໍ່ມີອັນໃດຂອງເຫຼົ່າສັດໃນມະນຸດໂລກນີ້
ທີ່ຈະປະເສີດໄປກວ່າການບໍລິຈາກ
ເຮົາໄດ້ບໍລິຈາກດວງຕາເຊິ່ງເປັນຂອງມະນຸດແລ້ວ
ກັບໄດ້ດວງຕາອັນຍິ່ງກວ່າຂອງມະນຸດ

[໗໒] ອ້າຍນ້ອງຊາວເມືອງສີພີທັງຫຼາຍ
ພວກທ່ານໄດ້ເຫັນດວງຕາທິບ ທີ່ເຮົາໄດ້ແລ້ວແມ່ນນີ້
ຈົ່ງໃຫ້ທານ ຈົ່ງບໍຣິໂພກເທີ້ນ
ຄົນທີ່ໃຫ້ແລ້ວແລະບໍຣິໂພກແລ້ວຕາມຄວາມສາມາດ
ບໍ່ເພິ່ງຖືກນິນທາ ເພິ່ງເຂົ້າເຖິງແດນສະຫວັນ

**ສີວິຣາຊະຊາດົກທີ ໖ ຈົບ**

## ໔. ສິຣິມັນຕະຊາດົກ (໕໐໐)
## ວ່າດ້ວຍບັນຫາຄວາມມີສິຣິກັບມີປັນຍາ

(ພຣະຣາຊາຕັດໃນສິຣິມັນຕະບັນຫາວ່າ)

[໗໓] ທ່ານອາຈານເສນະກະ ເຮົາຂໍຖາມເນື້ອຄວາມນີ້ກັບທ່ານ
ໃນຄົນ ໔ ປະເພດນີ້ ຄື ຄົນທີ່ມີປັນຍາແຕ່ປາສະຈາກສິຣິ
ຫຼືຄົນທີ່ມີຍົດແຕ່ປາສະຈາກປັນຍາ
ຜູ້ສະຫຼາດກ່າວຄົນໃດວ່າປະເສີດ

(ເສນະກະບັນດິດຂາບທູນຢ່າງທັນທີວ່າ)

[໗໔] ຂໍເດຊະພຣະອົງຜູ້ຈອມຊົນ
ຄົນທັງຫຼາຍເປັນນັກປາດກໍຕາມ ເປັນຄົນໂງ່ກໍຕາມ
ມີສິລະປະກໍຕາມ ບໍ່ມີສິລະປະກໍຕາມ
ແມ່ນມີຊາດສະກຸນສູງກໍເປັນຄົນຮັບໃຊ້ຂອງຄົນ
ມີຍົດເຖິງຈະມີຊາດສະກຸນຕໍ່າ
ຂ້າພຣະອົງເຫັນເຫດແມ່ນນີ້

ຈຶ່ງຂາບທູນວ່າ ຄົນມີປັນຍາເປັນຄົນຊົ່ວ
ຄົນມີສີຣິທີ່ນັ້ນເປັນຄົນປະເສີດ

(ພຣະຣາຊາຕັດຖາມມະໂຫສົດບັນດິດເຊິ່ງນັ່ງເປັນຄົນໃໝ່ໃນໝູ່ບັນດິດວ່າ)

[໙໔] ເຮົາຂໍຖາມທ່ານແດ່ ທ່ານມະໂຫສົດບັນດິດ
ຜູ້ມີປັນຍາບໍ່ຊາມ ຜູ້ເຫັນທຳທັງໝົດໃນຄົນ ໔ ປະເພດນີ້
ຄື ຄົນໂງ່ແຕ່ມີຍົດ ຫຼື ບັນດິດແຕ່ມີໂພຄະຊັບໜ້ອຍ
ຜູ້ສະຫຼາດກ່າວຄົນໃດວ່າປະເສີດ

(ພຣະໂພທິສັດມະໂຫສົດບັນດິດຂາບທູນວ່າ)

[໙໕] ຄົນໂງ່ເຮັດແຕ່ກຳຊົ່ວ ສຳຄັນອິດສະຣິຍະຍົດນີ້ທີ່ນັ້ນວ່າປະເສີດ
ຄົນໂງ່ເຫັນແຕ່ໂລກນີ້ ບໍ່ເຫັນໂລກໜ້າ
ຈຶ່ງຍຶດຖືເອົາແຕ່ໂທດໃນໂລກທັງ ໒
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາທີ່ນັ້ນປະເສີດ ຄົນໂງ່ທີ່ມີຍົດບໍ່ປະເສີດເລີຍ

(ເສນະກະບັນດິດຂາບທູນຄັດຄ້ານແລ້ວວ່າ)

[໙໖] ສິລະປະນີ້ກໍດີ ເຜົ່າພັນກໍດີ ສ່ວນແຫ່ງຮ່າງກາຍກໍດີ
ຈັດແຈງໂພຄະບໍ່ໄດ້
ໂຜດທອດພຣະເນດເບິ່ງໂຄວິນທະຜູ້ເປັນໃບ້ຍ້ອນນ້ຳລາຍ
ເຊິ່ງໄດ້ຮັບຄວາມສຸກຍ້ອນຄົນມີສີຣິຍ່ອມຄົບຫາເຂົາ
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາເປັນຄົນຊົ່ວ ຄົນມີສີຣິທີ່ນັ້ນປະເສີດ

(ມະໂຫສົດບັນດິດຂາບທູນຄັດຄ້ານວ່າ)

[໙໗] ຄົນມີປັນຍາໜ້ອຍໄດ້ຮັບຄວາມສຸກຍ່ອມມົວເມົາ
ແມ່ນຖືກຄວາມທຸກກະທົບຍ່ອມຫຼົງ
ຖືກຄວາມສຸກແລະຄວາມທຸກຈົນມາກະທົບເຂົ້າ
ຍ່ອມຫວັ່ນໄຫວເໝືອນປາໃນລະດູຮ້ອນ
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາທີ່ນັ້ນປະເສີດ ຄົນໂງ່ເຖິງມີຍົດກໍບໍ່ປະເສີດເລີຍ

(ເສນະກະບັນດິດຂາບທູນຄັດຄ້ານວ່າ)

[໗໙] ຕົ້ນໄມ້ໃນປ່າທີ່ມີໝາກໄມ້ດົກ
ຝູງນົກຍ່ອມບິນເວີ່ນໄປມາຢູ່ຮອບຕົ້ນສັນໃດ
ຄົນຜູ້ມັ່ງຄັ່ງມີຊັບ ມີໂພຄະກໍສັນນັ້ນ
ຄົນເປັນຈຳນວນຫຼາຍຍ່ອມຄົບຫາຍ້ອນເຫດແຫ່ງປະໂຫຍດ
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາເປັນຄົນຊົ່ວ ຄົນມີສີຣິທີ່ນັ້ນປະເສີດ

(ມະໂຫສົດບັນດິດຂາບທູນຄັດຄ້ານວ່າ)

[໘໐] ຄົນໂງ່ເຖິງຈະມີກຳລັງກໍບໍ່ຍັງປະໂຫຍດໃຫ້ສຳເລັດໄດ້
ນາຍນິຣະຍະບານທັງຫຼາຍຍ່ອມດຶງລາກຄົນມີປັນຍາຊາມ
ຜູ້ຄ່ຳຄວນເຖິງຊັບທີ່ຕົນຫາມາໄດ້ດ້ວຍກຳອັນໂຫດຮ້າຍ
ໄປສູ່ນະຣົກທີ່ມີເວທະນາອັນແຮງກ້າ
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາທີ່ນັ້ນປະເສີດ ຄົນໂງ່ເຖິງມີຍົດກໍບໍ່ປະເສີດເລີຍ

(ເສນະກະບັນດິດຂາບທູນວ່າ)

[໘໑] ແມ່ນ້ຳບາງສາຍຍ່ອມໄຫຼລົງສູ່ແມ່ນ້ຳຄົງຄາ
ແມ່ນ້ຳເຫຼົ່ານັ້ນທຸກສາຍຍ່ອມລະຖິ້ມຊື່ແລະໂຄດ (ຂອງຕົນ)
ແມ່ນ້ຳຄົງຄາເມື່ອໄຫຼລົງສູ່ທ້ອງທະເລກໍບໍ່ຜາກົດຊື່ສັນໃດ
ແມ່ນຄົນມີປັນຍາໃນໂລກກໍສັນນັ້ນ ຍ່ອມບໍ່ຜາກົດຄວາມສຳເລັດ
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາເປັນຄົນຊົ່ວ ຄົນມີສີຣິທີ່ນັ້ນປະເສີດ

(ມະໂຫສົດບັນດິດຂາບທູນວ່າ)

[໘໒] ທະເລໃຫຍ່ຫຼວງທີ່ທ່ານອາຈານກ່າວເຖິງ
ເຊິ່ງແມ່ນ້ຳນ້ອຍໃຫຍ່ຫຼັ່ງໄຫຼໄປ
ນັບບໍ່ຖ້ວນຢູ່ຕະຫຼອດການທັງປວງ
ມີກຳລັງໂອລານຢູ່ເປັນນິດ
ມະຫາສະມຸດຍ່ອມບໍ່ລ່ວງເລີຍຝັ່ງໄປໄດ້ສັນໃດ

[໗໖]	ແມ່ນຄຳເວົ້າຂອງຄົນໂງ່ກໍສັນນັ້ນ ໃນການບາງເທື່ອບາງເວລາ
ເຖິງຄົນມີສີຣິກໍບໍ່ລ່ວງເລີຍຄົນມີປັນຍາໄປໄດ້
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາທີ່ນັ້ນປະເສີດ ຄົນໂງ່ເຖິງມີຍົດກໍບໍ່ປະເສີດເລີຍ

(ເສນະກະບັນດິດຂາບທູນວ່າ)

[໗໘]	ເຖິງແມ່ນຄົນຜູ້ບໍ່ສັງລວມແຕ່ມີຍົດ
ດຳຣົງຢູ່ໃນຖານະຜູ້ພິຈາລະນາ
ຍ່ອມກ່າວເນື້ອຄວາມແກ່ຄົນເຫຼົ່າອື່ນ
ຄຳເວົ້າຂອງເຂົານັ້ນນັ້ນແລຍ່ອມງອກງາມໃນທ່າມກາງແຫ່ງໝູ່ຍາດ
ຍ້ອນຄົນມີສີຣິຍັງຄົນເຫຼົ່າອື່ນໃຫ້ເຮັດຕາມຄຳເວົ້າຂອງຕົນນັ້ນໄດ້
ຄົນມີປັນຍາເຮັດບໍ່ໄດ້ເລີຍ
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາເປັນຄົນຊົ່ວ ຄົນມີສີຣິທີ່ນັ້ນປະເສີດ

(ມະໂຫສົດບັນດິດຂາບທູນວ່າ)

[໗໕]	ຍ້ອນເຫດແຫ່ງຄົນອື່ນແດ່ ຫຼືຍ້ອນເຫດແຫ່ງຕົນແດ່
ຄົນໂງ່ມີປັນຍາໜ້ອຍຍ່ອມເວົ້າຕົວະໄດ້
ເຂົາຍ່ອມຖືກນິນທາໃນທ່າມກາງສະພາ
ແມ່ນໃນພາຍຫຼັງເຂົາຍ່ອມໄປສູ່ທຸຄະຕິ
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາທີ່ນັ້ນປະເສີດ ຄົນໂງ່ເຖິງມີຍົດກໍບໍ່ປະເສີດເລີຍ

(ເສນະກະບັນດິດຂາບທູນວ່າ)

[໗໖]	ຄົນມີປັນຍາດັ່ງແຜ່ນດິນແຕ່ບໍ່ມີບ່ອນຢູ່ອາໄສ
ມີຊັບໜ້ອຍ ຍາກຈົນ ແມ່ນທາກຈະກ່າວຂໍ້ຄວາມ
ຄຳເວົ້າຂອງເຂົານັ້ນກໍບໍ່ງາມໃນທ່າມກາງໝູ່ຍາດ
ທຳມະດາສີຣິບໍ່ມີແກ່ຄົນມີປັນຍາ
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາເປັນຄົນຊົ່ວ ຄົນມີສີຣິທີ່ນັ້ນປະເສີດ

(ມະໂຫສົດບັນດິດຂາບທູນວ່າ)

[໙໗] ຍ້ອນເຫດແຫ່ງຄົນອື່ນແດ່ ຍ້ອນເຫດແຫ່ງຕົນແດ່
ຄົນມີປັນຍາດັ່ງແຜ່ນດິນຈະບໍ່ເວົ້າໂລເລ
ເຂົາມີຄົນບູຊາແລ້ວໃນທ່າມກາງສະພາ
ແມ່ນໃນພາຍຫຼັງເຂົາກໍໄປສູ່ສຸກຄະຕິ
ຂ້າພຣະອົງເຫັນເຫດແມ່ນນີ້ ຈຶ່ງຂາບທູນວ່າ
ຄົນມີປັນຍາທີ່ນັ້ນປະເສີດ ຄົນໂງ່ເຖິງມີຍົດກໍບໍ່ປະເສີດເລີຍ

(ເສນະກະບັນດິດຂາບທູນວ່າ)

[໙໘] ຊ້າງ ງົວ ມ້າ ຕຸ້ມຫູແກ້ວມະນີ
ແລະຍິງທັງຫຼາຍເກີດໃນສະກຸນທີ່ມັ່ງຄັ່ງ
ທັງໝົດເຫຼົ່ານັ້ນລ້ວນເປັນເຄື່ອງອຸປະໂພກຂອງຄົນມັ່ງຄັ່ງ
ຄົນຜູ້ບໍ່ມັ່ງຄັ່ງກໍເປັນເຄື່ອງອຸປະໂພກຂອງຄົນມັ່ງຄັ່ງ
ຂ້າພຣະອົງເຫັນເຫດແມ່ນນີ້ ຈຶ່ງຂາບທູນວ່າ
ຄົນມີປັນຍາເປັນຄົນຊົ່ວ ຄົນມີສິຣິທີ່ນັ້ນປະເສີດ

(ມະໂຫສົດບັນດິດຍົກເຫດຜົນຢ່າງອື່ນມາວ່າ)

[໙໙] ສິຣິຍ່ອມລະຄົນໂງ່ຜູ້ບໍ່ຈັດແຈງວຽກງານ
ມີຄວາມຄິດຊົ່ວຊາມ ມີປັນຍາຊາມໄປເໝືອນງູລອກຄາບເກົ່າຖິ້ມ
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາທີ່ນັ້ນປະເສີດ ຄົນໂງ່ເຖິງມີຍົດກໍບໍ່ປະເສີດເລີຍ

(ຕໍ່ມາເສນະກະບັນດິດຄິດຈະທຳລາຍວາທະຂອງມະໂຫສົດບັນດິດ ຈຶ່ງກ່າວວ່າ)

[໑໐໐] ຂໍຈົ່ງຊົງພຣະຈະເລີນ ຂ້າພຣະອົງທັງ ໕ ຄົນນີ້ແລເປັນບັນດິດ
ທັງໝົດລ້ວນຕ້ອງປະຄອງອັນຊະລີບຳຣຸງພຣະອົງ
ພຣະອົງຊົງເປັນອິດສະຫຼະຄອບງຳຂ້າພຣະອົງທັງຫຼາຍ
ດັ່ງທ້າວສັກກະເທວະຣາດຜູ້ເປັນເຈົ້າແຫ່ງພູດ
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາເປັນຄົນຊົ່ວ ຄົນມີສິຣິທີ່ນັ້ນປະເສີດ

(ພຣະໂພທິສັດມະໂຫສົດບັນດິດ ເມື່ອຈະທຳລາຍວາທະຂອງເສນະກະບັນດິດ ຈຶ່ງຂາບທູນພຣະຣາຊາວ່າ)

[໑໐໑] ຄົນໂງ່ມີຍົດ ເມື່ອມີເຫດຕ່າງ ໆ ເກີດຂຶ້ນ
ກໍເປັນທາດຄົນມີປັນຍາ
ບັນດິດຍ່ອມຈັດການເຫດທີ່ລະອຽດໄດ້
ຄົນໂງ່ຍ່ອມເຖິງຄວາມງວຍງົງໃນເຫດນັ້ນ
ຂ້າພຣະອົງເຫັນເຫດແມ່ນນີ້ຈຶ່ງຂາບທູນວ່າ
ຄົນມີປັນຍາທໍ່ນັ້ນປະເສີດ ຄົນໂງ່ເຖິງມີຍົດກໍບໍ່ປະເສີດເລີຍ

(ພຣະໂພທິສັດມະໂຫສົດບັນດິດສັນເສີນປັນຍາໃຫ້ຍິ່ງຂຶ້ນໄປວ່າ)

[໑໐໔] ແທ້ຈິງ ປັນຍາທໍ່ນັ້ນສັດຕະບຸຣຸດທັງຫຼາຍສັນເສີນ
ສິຣິເປັນທີ່ຕ້ອງການຂອງຄົນໂງ່ຜູ້ຍິນດີໃນໂພຄະ
ສ່ວນຍານຂອງທ່ານຜູ້ຮູ້ທັງຫຼາຍວັດບໍ່ໄດ້
ຄົນມີສິຣິລ່ວງເລີຍຄົນມີປັນຍາໄປບໍ່ໄດ້ບໍ່ວ່າໃນການໃດ ໆ

(ພຣະຣາຊາສະດັບດັ່ງນັ້ນ ຊົງຍິນດີຕໍ່ການແກ້ບັນຫາຂອງພຣະໂພທິສັດມະໂຫສົດ ຈຶ່ງຕັດວ່າ)

[໑໐໖] ມະໂຫສົດບັນດິດຜູ້ເຫັນທຳໂດຍທົ່ວເຖິງ
ເຮົາໄດ້ຖາມບັນຫາໃດກັບເຈົ້າ
ເຈົ້າກໍໄດ້ແກ້ບັນຫານັ້ນແກ່ເຮົາ
ເຮົາພໍໃຈການແກ້ບັນຫາ
ຈຶ່ງໃຫ້ງົວແກ່ເຈົ້າ ໑,໐໐໐ ໂຕ
ງົວອຸສະພະແລະຊ້າງ ລົດທຽມມ້າອາຊາໄນເຫຼົ່ານີ້ ໑໐ ຄັນ
ແລະບ້ານສ່ວຍ ໑໖ ເຂດ

**ສິຣິມັນຕະຊາດົກທີ ໔ ຈົບ**

## ໕. ໂຣຫະນະມິຄະຊາດົກ (໕໐໑)
## ວ່າດ້ວຍພະຍາເນື້ອຊື່ໂຣຫະນະ

(ພຣະໂພທິສັດເກີດເປັນພະຍາເນື້ອໂຣຫະນະພົບເນື້ອຈິດຕະກະຕົວນ້ອງ ຈຶ່ງກ່າວວ່າ)

[໑໐໔] ທ້າວຈິດຕະກະ ຝູງເນື້ອເຫຼົ່ານັ້ນຢ້ານຕາຍຈຶ່ງພາກັນຫຼົບໜີໄປ

ເຖິງເຈົ້າກໍຈົ່ງໜີໄປເທີ້ນ ຢ່າຫ່ວງໃຍອ້າຍເລີຍ
ຝູງເນື້ອເຫຼົ່ານັ້ນຈັກມີຊີວິດຢູ່ຮ່ວມກັບເຈົ້າ

(ເນື້ອຈິດຕະກະຕອບວ່າ)

[໑໐໕] ອ້າຍໂຣຫະນະເຮົາບໍ່ໄປ
ເຖິງໃຜຈັກຄວັກດວງໃຈເຮົາໄປ
ເຮົາກໍຈັກບໍ່ລະຖິ້ມອ້າຍໄປ
ເຮົາຈັກສະລະຊີວິດຖິ້ມໄວ້ໃນບ່ອນນີ້

(ພະຍາເນື້ອໂຣຫະນະກ່າວວ່າ)

[໑໐໖] ກໍບິດາມານດາຜູ້ຕາບອດຂອງພວກເຮົາ
ທ່ານທັງ ໔ ນັ້ນບໍ່ມີຜູ້ນຳຈັກຕ້ອງຕາຍແນ່ນອນ
ເຖິງເຈົ້າກໍຈົ່ງໜີໄປເທີ້ນ ຢ່າຫ່ວງໃຍອ້າຍເລີຍ
ທ່ານທັງ ໔ ນັ້ນຈັກມີຊີວິດຢູ່ຮ່ວມກັບເຈົ້າ

(ເນື້ອຈິດຕະກະກ່າວວ່າ)

[໑໐໗] ອ້າຍໂຣຫນະ ເຮົາບໍ່ໄປ
ເຖິງໃຜຈັກຄວັກດວງໃຈເຮົາໄປ
ເຮົາກໍຈັກບໍ່ລະຖິ້ມອ້າຍຜູ້ຕິດບ້ວງໄປ
ເຮົາຈັກສະລະຊີວິດຖິ້ມໄວ້ໃນບ່ອນນີ້

(ພຣະໂພທິສັດໂຣຫະນະເຫັນນ້ອງສຸຕະນາກັບມາ ຈຶ່ງກ່າວວ່າ)

[໑໐໘] ໜີໄປເທີ້ນ ນາງຜູ້ກຳລັງຈະມີໄພ ເຈົ້າຈົ່ງໜີໄປ
ອ້າຍຕິດບ້ວງຜູກລ່າມຕິດກັບເຫຼັກ ເຈົ້າກໍຈົ່ງໜີໄປເທີ້ນ
ຢ່າຫ່ວງໃຍອ້າຍເລີຍ
ຝູງເນື້ອເຫຼົ່ານັ້ນຈັກມີຊີວິດຢູ່ຮ່ວມກັບເຈົ້າ

(ເນື້ອສຸຕະນາກ່າວວ່າ)

[໑໐໙] ອ້າຍໂຣຫະນະ ເຮົາບໍ່ໄປ
ເຖິງໃຜຈັກຄວັກດວງໃຈເຮົາໄປ
ເຮົາກໍຈັກບໍ່ລະຖິ້ມອ້າຍໄປ
ເຮົາຈັກສະລະຊີວິດຖິ້ມໄວ້ໃນບ່ອນນີ້

(ພະຍາເນື້ອໂພທິສັດໂຣຫະນະກ່າວວ່າ)

[໑໑໐] ກໍບິດາມານດາຜູ້ຕາບອດຂອງພວກເຮົາ
ທ່ານທັງ ໔ ນັ້ນບໍ່ມີຜູ້ນຳທາງຈັກຕ້ອງຕາຍແນ່ນອນ
ເຖິງເຈົ້າກໍຈົ່ງໜີໄປເທີ້ນ ຢ່າຫ່ວງໃຍອ້າຍເລີຍ
ທ່ານທັງ ໔ ນັ້ນຈັກມີຊີວິດຢູ່ຮ່ວມກັບເຈົ້າ

(ເນື້ອສຸຕະນາຕອບວ່າ)

[໑໑໑] ອ້າຍໂຣຫະນະ ເຮົາບໍ່ໄປ
ເຖິງໃຜຈັກຄວັກດວງໃຈເຮົາໄປ
ເຮົາກໍຈັກບໍ່ລະຖິ້ມອ້າຍຜູ້ຕິດບ້ວງໄປ
ເຮົາຈັກສະລະຊີວິດຖິ້ມໄວ້ໃນບ່ອນນີ້

(ພະຍາເນື້ອໂພທິສັດໂຣຫະນະເຫັນນາຍພານກຳລັງຍ່າງມາ ຈຶ່ງກ່າວວ່າ)

[໑໑໒] ທັ້ນເດ ນາຍພານຜູ້ໂຫດຮ້າຍພ້ອມທັງອາວຸດ
ຜູ້ຈັກໃຊ້ລູກສອນຫຼືຫອກຂ້າພວກເຮົາໃນວັນນີ້ກຳລັງຍ່າງມາ

(ພຣະສາດສະດາຊົງປະກາດຂໍ້ຄວາມນັ້ນວ່າ)

[໑໑໓] ນາງລູກເນື້ອນັ້ນ ຖືກໄພບີບຄັ້ນຄຸກຄາມແລ່ນໜີໄປບຶດໜຶ່ງ
ເຖິງຈະມີຄວາມຢ້ານແຕ່ກໍໄດ້ເຮັດສິ່ງທີ່ເຮັດໄດ້ແສນຍາກ
ໄດ້ກັບມາຜະເຊີນໜ້າຕໍ່ຄວາມຕາຍ

(ນາຍພານຖາມເຫດຜົນທີ່ເນື້ອ ໔ ຕົວເປັນຫຍັງກັບພະຍາເນື້ອວ່າ)

[໑໑໔] ເນື້ອທັງ ໔ ນີ້ເປັນອັນໃດກັບເຈົ້ານໍ
ໜີໄປແລ້ວຍັງກັບມາຫາເຈົ້າຜູ້ຕິດບ້ວງອີກ
ພວກເຂົາບໍ່ປາຖະໜາຈະຖິ້ມເຈົ້າໄປແມ່ນຍ້ອນເຫດແຫ່ງຊີວິດ

(ລຳດັບນັ້ນ ພຣະໂພທິສັດໄດ້ບອກແກ່ນາຍພານນັ້ນວ່າ)

[໑໑໕] ນາຍພານ ເຂົາທັງ ໔ ເປັນອ້າຍນ້ອງ
ຮ່ວມທ້ອງມານດາດຽວກັນກັບຂ້າພະເຈົ້າ
ພວກເຂົາຈຶ່ງບໍ່ປາຖະໜາຈະຖິ້ມຂ້າພະເຈົ້າໄປແມ່ນຍ້ອນເຫດແຫ່ງຊີວິດ

(ພະຍາເນື້ອຈິດຕະກະຮູ້ວ່ານາຍພານມີຈິດອ່ອນໂຍນຈຶ່ງກ່າວເຫດຜົນຕ່າງ ໆ ວ່າ)

[໑໑໖] ກໍບິດາມານດາຜູ້ຕາບອດຂອງພວກເຮົາ
ທ່ານທັງ ໔ ນັ້ນບໍ່ມີຜູ້ນຳທາງຈັກຕ້ອງຕາຍແນ່ນອນ
ຂໍທ່ານຈົ່ງໃຫ້ຊີວິດແກ່ພວກເຮົາທັງ ໕
ໂຜດປ່ອຍອ້າຍຂອງພວກເຮົາໄປເທີ້ນ ພໍ່ພານ

(ນາຍພານນັ້ນຟັງຄຳຂອງເນື້ອຈິດຕະກະແລ້ວມີຈິດເຫຼື້ອມໃສ ຈຶ່ງກ່າວປອບໂຍນວ່າ)

[໑໑໗] ເຮົານັ້ນຈະປ່ອຍເນື້ອທີ່ລ້ຽງບິດາມານດາ
ຂໍບິດາມານດາຂອງພວກເຈົ້າຈົ່ງຍິນດີຢູ່ເປັນສຸກ
ຍ້ອນໄດ້ເຫັນພະຍາເນື້ອຫຼຸດພົ້ນຈາກບ້ວງແລ້ວເທີ້ນ

(ເນື້ອຈິດຕະກະພົບພຣະໂພທິສັດແລ້ວດີໃຈຈຶ່ງອະນຸໂມທະນາແກ່ນາຍພານວ່າ)

[໑໑໘] ນາຍພານ ວັນນີ້ຂ້າພະເຈົ້າເຫັນພະຍາເນື້ອ
ພົ້ນຈາກອັນຕະລາຍແລ້ວຍ່ອມເປັນສຸກສັນໃດ
ຂໍທ່ານພ້ອມກັບຍາດທັງໝົດຈົ່ງເປັນສຸກສັນນັ້ນເທີ້ນ

(ບິດາມານດາຖາມເຖິງເຫດທີ່ພະຍາເນື້ອໂຣຫະນະຫຼຸດຈາກບ້ວງວ່າ)

[໑໑໙] ເມື່ອຊີວິດເຂົ້າມາໃກ້ຄວາມຕາຍ ເຈົ້າຫຼຸດພົ້ນມາໄດ້ແນວໃດ
ລູກຮັກ ເປັນຫຍັງນາຍພານຈຶ່ງໄດ້ປ່ອຍເຈົ້າອອກຈາກບ້ວງນໍ?

(ພຣະໂພທິສັດກ່າວວ່າ)

[໑໒໐] ນ້ອງຈິດຕະກະ ເມື່ອກ່າວວາຈາອັນມ່ວນນວນຫູ ຈັບຈິດຈັບໃຈ
ຊາບຊຶ້ງຕຶງໃຈ ຊ່ອຍໃຫ້ລູກຫຼຸດພົ້ນມາໄດ້ດ້ວຍວາຈາສຸພາສິດ

[໑໒໑] ນ້ອງສຸຕະນາ ເມື່ອກ່າວວາຈາອັນມ່ວນນວນຫູ ຈັບຈິດຈັບໃຈ
ຊາບຊຶ້ງຕຶງໃຈ ຊ່ອຍໃຫ້ລູກຫຼຸດພົ້ນມາໄດ້ດ້ວຍວາຈາສຸພາສິດ

[໑໒໒] ຍ້ອນຟັງວາຈາມ່ວນນວນຫູ
ຈັບຈິດຈັບໃຈ ຊາບຊຶ້ງຕຶງໃຈ
ແລະຍ້ອນໄດ້ຟັງວາຈາສຸພາສິດ
ນາຍພານຈຶ່ງໄດ້ປ່ອຍລູກມາ

(ບິດາມານດາອະນຸໂມທະນາຕໍ່ນາຍພານວ່າ)

[໑໘໓] ຂໍໃຫ້ນາຍພານຈົ່ງມີຄວາມສຸກພ້ອມກັບບຸດແລະພັນລະຍາ
ເໝືອນພວກເຮົາມີຄວາມສຸກໃນວັນນີ້
ຍ້ອນໄດ້ເຫັນລູກໂຣຫະນະກັບມາ

(ພຣະຣາຊາຊົງເຫັນນາຍພານມາເຝົ້າ ຈຶ່ງຕັດວ່າ)

[໑໘໔] ນາຍພານ ເຈົ້າໄດ້ກ່າວໄວ້ແລ້ວວ່າ
ຈັກນຳຕົວເນື້ອຫຼືໜັງມາບໍ່ແມ່ນບໍ
ກໍຍ້ອນເຫດອັນໃດນໍ? ເຈົ້າຈຶ່ງບໍ່ນຳຕົວເນື້ອຫຼືໜັງມາເລີຍ

(ນາຍພານຂາບທູນວ່າ)

[໑໘໕] ພະຍາເນື້ອໄດ້ມາສູ່ເງື້ອມມືແລະໄດ້ຕິດບ້ວງແລ້ວ
ແຕ່ເນື້ອທີ່ບໍ່ຕິດບ້ວງ ໔ ຕົວໄດ້ເຂົ້າມາຫາພະຍາເນື້ອນັ້ນ
[໑໘໖] ຂ້າພຣະອົງນັ້ນໄດ້ມີຄວາມສັງເວດ
ຂົນພອງສະຍອງເກົ້າ ບໍ່ເຄີຍເປັນມາກ່ອນວ່າ
ຖ້າເຮົາຂ້າເນື້ອຕົວນີ້ ເຮົາຈັກຕ້ອງເສຍໃຈໄປຕະລອດຊີວິດ

(ພຣະຣາຊາຊົງສະດັບດັ່ງນັ້ນແລ້ວ ຕັດວ່າ)

[໑໘໗] ນາຍພານ ເນື້ອເຫຼົ່ານັ້ນເປັນແນວໃດ ມີທຳແນວໃດ
ມີສີສັນແນວໃດ ມີປົກກະຕິແນວໃດ
ເຈົ້າຈຶ່ງປ່ອຍພວກມັນໄປ

(ນາຍພານຂາບທູນວ່າ)

[໑໘໘] ເນື້ອເຫຼົ່ານັ້ນມີເຂົາສີຂາວ ຂົນຫາງສະອາດ
ຜິວໜັງປານດັ່ງຄຳ
ຂາແດງ ດວງຕາໃຫຍ່ ຈົບງາມເປັນຕາເບິ່ງ

(ນາຍພານປະກາດສີກາຍຂອງເນື້ອເຫຼົ່ານັ້ນວ່າ)

[໑໘໙] ຂໍເດຊະພຣະອົງຜູ້ສົມມຸດຕິເທບ ເນື້ອເຫຼົ່ານັ້ນເປັນແນວນີ້
ມີທຳແນວນີ້ ເປັນຜູ້ລ້ຽງດູບິດາມານດາ
ຂໍເດຊະ ຂ້າພຣະອົງຈຶ່ງບໍ່ໄດ້ນຳມາຖວາຍພຣະອົງ

(ພຣະຣາຊາຊົງພໍພຣະທະໄທແລ້ວ ຊົງຮັບສັ່ງປູນບໍາເໜັດຊຸບລ້ຽງບຸດນາຍພານດ້ວຍຍົດໃຫຍ່ ໂດຍຕັດວ່າ)

[໑໓໐] ພໍ່ພານ ເຮົາຈະໃຫ້ຄໍາແກ່ທ່ານ ໑໐໐ ແທ່ງ
ຕຸ້ມຫູແກ້ວມະນີທີ່ມີຄ່າຫຼາຍ ແລະບັນລັງ ໔ ຫຼ່ຽມ
ມີສີອັນເປັນສິຣິຄ້າຍດອກຜັກຕົບ

[໑໓໑] ພັນລະຍາທີ່ເໝາະສົມກັນ ໔ ຄົນ
ແລະງົວອຸສະພະອີກ ໑໐໐ ຕົວ
ເຮົາຈັກຄອບຄອງຣາດຊະສົມບັດໂດຍທໍາ
ພໍ່ພານ ທ່ານມີອຸປະການະແກ່ເຮົາຫຼາຍ

[໑໓໔] ພໍ່ພານ ທ່ານຈົ່ງລ້ຽງດູພັນລະຍາດ້ວຍກະສິກໍາຄ້າຂາຍ
ການໃຫ້ກູ້ໜີ້ແລະການທ່ຽວສະແຫວງຫາໂດຍທໍາເທີ້ນ
ຢ່າໄດ້ທໍາບາບອີກເລີຍ

**ໂຣຫະນະມິຄະຊາດົກທີ 5 ຈົບ**

## ໖. ຈູລະຫັງສະຊາດົກ (໕໐໔)
## ວ່າດ້ວຍຫົງສຸມຸຂະຜູ້ພັກດີຕໍ່ພະຍາຫົງຈູລະຫັງສະ

(ພຣະໂພທິສັດເກີດເປັນພະຍາຫົງຄໍາເມື່ອຈະທົດລອງໃຈຫົງສຸມຸຂະ ຈຶ່ງກ່າວວ່າ)

[໑໓໓] ຝູງຫົງເຫຼົ່ານັ້ນຖືກໄພຄຸກຄາມ
ມີຄວາມຢ້ານຈົນຕ້ອງບິນໜີໄປ
ທ່ານສຸມຸຂະຜູ້ມີຜິວພັນເຫຼືອງອະລ່າມດັ່ງຄໍາ
ທ່ານຈົ່ງບິນໜີໄປຕາມຄວາມປະສົງເທີ້ນ

[໑໓໔] ເຮົາຜູ້ດຽວຕິດບ້ວງຢູ່ ໝູ່ຍາດທັງຫຼາຍບໍ່ຫຼຽວແລ
ພາກັນລະຖິ້ມບິນໜີໄປ ເຫຼືອເຈົ້າຢູ່ແຕ່ຕົວດຽວ

[໑໓໕] ທ່ານສຸມຸຂະຜູ້ປະເສີດຈົ່ງໂຜບິນໜີໄປເທີ້ນ
ຍ້ອນຄວາມເປັນສະຫາຍບໍ່ມີຢູ່ໃນຜູ້ຕິດບ້ວງ
ທ່ານຢ່າທໍາຄວາມພຽນເພື່ອຄວາມບໍ່ມີທຸກໃຫ້ເສື່ອມເສຍໄປເລີຍ
ຈົ່ງບິນໜີໄປຕາມຄວາມປະສົງເທີ້ນ

(ທີງສຸມຸຂະເສນາບໍດີຈັບຢູ່ເທີງຕົນກ່າວວ່າ)

[໑໓໕] ທ້າວທະຕະຣັດຖະ ຂ້າພຣະອົງຈະບໍ່ລະຖິ້ມພຣະອົງໄປ
ຍ້ອນເຫດພຽງເທົ່ານີ້ວ່າ ພຣະອົງຕ້ອງປະສົບທຸກ
ຂ້າພຣະອົງຈະຢູ່ຈະຕາຍກັບພຣະອົງໃນບ່ອນນີ້

(ພະຍາຫົງທະຕະຣັດຖະກ່າວວ່າ)

[໑໓໖] ທ່ານສຸມຸຂະ ຄໍາໃດທີ່ທ່ານກ່າວອອກມາ
ຄໍານັ້ນເປັນຄໍາອັນດີງາມຂອງອະຣິຍະຊົນ
ແຕ່ເຮົາເມື່ອຈະທົດລອງທ່ານ ຈຶ່ງໄດ້ກ່າວຄໍານັ້ນອອກໄປວ່າ
ຈົ່ງບິນໜີໄປສາເທີ້ນ

(ຝ່າຍບຸດນາຍພານເຂົ້າໄປຫາພະຍາຫົງແລ້ວກ່າວວ່າ)

[໑໓໗] ທ່ານຜູ້ປະເສີດອຸດົມກວ່າຫົງທັງຫຼາຍ
ວິໄສປັກສາທິຊາຊາດຕົວຜະງາດສັນຈອນໄປໃນອາກາດ
ຍ່ອມເຮັດອາກາດທີ່ບໍ່ແມ່ນທາງໃຫ້ເປັນທາງບິນໄປໄດ້
ທ່ານບໍ່ຮູ້ວ່າມີບ້ວງຈາກທີ່ໄກບໍ?

(ພະຍາຫົງໂພທິສັດກ່າວວ່າ)

[໑໓໘] ເມື່ອໃດສັດມີຄວາມເສື່ອມໃນຂະນະຈະສິ້ນຊີວິດ
ເມື່ອນັ້ນເຖິງຈະມາໃກ້ຕາໜ່າງແລະບ້ວງກໍບໍ່ຮູ້

(ນາຍພານຊື່ນຊົມຄໍາເວົ້າຂອງພະຍາຫົງ ຈຶ່ງສົນທະນາກັບພະຍາຫົງສຸມຸຂະວ່າ)

[໑໔໐] ຝູງຫົງເຫຼົ່ານັ້ນຖືກໄພຄຸກຄາມ ມີຄວາມຢ້ານຈົນຕ້ອງບິນໜີໄປ
ທ່ານຜູ້ມີຜິວພັນເຫຼືອງອະລ່າມດັ່ງຄໍາ ທ່ານທໍ່ນັ້ນຍັງເຫຼືອຢູ່
[໑໔໑] ນົກທັງຫຼາຍເຫຼົ່ານັ້ນກິນດື່ມແລ້ວກໍບິນໄປ
ບໍ່ຫຼຽວແລ ທ່ານຜູ້ດຽວທໍ່ນັ້ນຍັງຢູ່ໃກ້ເຮົາ
[໑໔໒] ນົກຕົວນີ້ເປັນອັນໃດກັບເຈົ້ານໍ
ໜີໄປແລ້ວຍັງເຂົ້າໄປໃກ້ນົກຕົວຕິດບ້ວງອີກ
ນົກທັງຫຼາຍພາກັນປະຖິ້ມບິນໜີໄປ
ເຫຼືອເຈົ້າຢູ່ແຕ່ຕົວດຽວ

(ທ້າວສຸມຸຂະເສນາບໍດີກ່າວວ່າ)

[໑໘໓] ນົກຕົວນັ້ນເປັນຣາຊາຂອງຂ້າພະເຈົ້າ
ເປັນທັງມິດເປັນທັງເພື່ອນສະເໝີດ້ວຍຊີວິດຂອງຂ້າພະເຈົ້າ
ຂ້າພະເຈົ້າຈັກບໍ່ລະຖິ້ມທ່ານໄປຕາບຈົນວັນຕາຍ

(ນາຍພານຟັງດັ່ງນັ້ນແລ້ວມີຈິດເຫຼື້ອມໃສ ຄິດຈະປ່ອຍພະຍາຫົງທີ່ຕິດບ້ວງ ຈຶ່ງກ່າວວ່າ)

[໑໘໔] ກໍເຈົ້າປະສົງຈະສະລະຊີວິດຍ້ອນເຫດແຫ່ງເພື່ອນ
ເຮົາຍອມປ່ອຍສະຫາຍຂອງເຈົ້າ ຂໍພະຍາຫົງຈົ່ງຕາມເຈົ້າໄປເທີ້ນ

(ທ້າວສຸມຸຂະເສນາບໍດີແນມເບິ່ງພຣະໂພທິສັດມີຈິດຍິນດີ ຈຶ່ງອະນຸໂມທະນາແກ່ນາຍພານວ່າ)

[໑໘໕] ນາຍພານ ວັນນີ້ຂ້າພະເຈົ້າເຫັນພະຍາຫົງຜູ້ເປັນໃຫຍ່ກວ່ານົກ
ພົ້ນຈາກອັນຕະລາຍແລ້ວຍ່ອມຣ່າເຣິງສັນໃດ
ຂໍທ່ານພ້ອມກັບຍາດທັງໝົດຈົ່ງຣ່າເຣິງສັນນັ້ນເທີ້ນ

(ພະຍາຫົງທູນຖາມພຣະຣາຊາວ່າ)

[໑໘໖] ພຣະອົງຊົງພຣະກະເສມສຳຣານຢູ່ບໍ?
ມີພຣະອະນາໄມສົມບູນແລ້ວບໍ?
ຣັດສີມາຮຸ່ງເຮື່ອງຢູ່ບໍ?
ພຣະອົງຊົງອະນຸສາດສັ່ງສອນພະສົກນິກອນໂດຍທຳຢູ່ບໍ?

(ພຣະຣາຊາຕັດວ່າ)

[໑໘໗] ພະຍາຫົງ ເຮົາສຸກກະເສມສຳຣານດີ
ອະນາໄມກໍສົມບູນດີ ອັນໜຶ່ງ ຣັດສີມາກໍຮຸ່ງເຮື່ອງ
ແລະເຮົາກໍອະນຸສາດພ່ຳສອນພະສົກນິກອນໂດຍທຳ

(ພະຍາຫົງທູນຖາມວ່າ)

[໑໘໘] ໂທດບາງປະການໃນໝູ່ອຳມາດຂອງພຣະອົງບໍ່ມີຢູ່ບໍ?
ອັນໜຶ່ງ ພຣະອົງມີສັດຕູໝູ່ອະມິດຢູ່ຫ່າງໄກ
ເໝືອນພຣະສາຍາຢູ່ດ້ານທິດທັກສິນຢູ່ບໍ?

(ພຣະຣາຊາຕອບວ່າ)

[໑໔໗] ແມ່ນໂທດບາງປະການໃນໝູ່ອຳນາດຂອງເຮົາກໍບໍ່ມີ
ອັນໜຶ່ງ ເຮົາມີສັດຕູໝູ່ອະມິດຢູ່ຫ່າງໄກເໝືອນເງົາດ້ານທິດທັກສິນ

(ພະຍາຫົງທູນຖາມວ່າ)

[໑໔໐] ພຣະອົງຊົງມີພຣະມະເຫສີທີ່ເໝາະສົມຢູ່ໃນພຣະໂອວາດ
ມີພຣະເສົາວະນີທີ່ໜ້າຮັກ ເຖິງພ້ອມດ້ວຍພຣະໂອຣົດ
ພຣະຮູບ ແລະພຣະຍົດ ຢູ່ໃນພຣະອຳນາດຕາມຄວາມພໍພຣະທະໄທ
ຂອງພຣະອົງຢູ່ບໍ?

(ພຣະຣາຊາຕອບວ່າ)

[໑໔໑] ຖືກແລ້ວ ເຮົາມີມະເຫສີທີ່ເໝາະສົມຢູ່ໃນໂອວາດ ມີດຳຣັດທີ່ໜ້າຮັກ
ເຖິງພ້ອມດ້ວຍປຸດຕະສົມບັດ ຮູບສົມບັດ ແລະຍົດສົມບັດ
ຢູ່ໃນອຳນາດຕາມຄວາມພໍໃຈຂອງເຮົາ

(ພະຍາຫົງທູນຖາມວ່າ)

[໑໔໔] ຂໍເດຊະພຣະອົງຜູ້ຊົງຜະດຸງຣັດໃຫ້ຈະເລີນ
ພຣະຣາດຊະບຸດຈຳນວນຫຼາຍຂອງພຣະອົງ ຊົງສົມພົບມາດີແລ້ວ
ເຖິງພ້ອມດ້ວຍພຣະປີຊາສະຫຼຽວສະຫຼາດ
ຍັງຊົງພາກັນຮື່ນເຮີງບັນເທີງພຣະທະໄທຢູ່ໃນສະຖານທີ່ນັ້ນ ໆ ຢູ່ບໍ?

(ພຣະຣາຊາຕອບວ່າ)

[໑໔໓] ທ້າວທະຕະຣັດຖະ ບຸດຂອງເຮົາ ໑໐໑ ພຣະອົງຜາກົດແລ້ວຍ້ອນເຮົາ
ຂໍທ່ານໂຜດຊີ້ແຈ່ງກິດທີ່ເພິ່ງທຳແກ່ພວກເຂົາດ້ວຍເທີ້ນ
ພວກເຂົາຈະບໍ່ຝ່າຝືນຄຳຂອງທ່ານ

(ພະຍາຫົງພຣະໂພທິສັດໄດ້ຟັງພຣະຣາດຊະດຳຣັດແລ້ວໄດ້ຖວາຍໂອວາດແກ່ພຣະຣາດຊະບຸດເຫຼົ່ານັ້ນວ່າ)

[໑໔໔] ແມ່ນຖ້າວ່າກຸນລະບຸດຜູ້ເຂົ້າເຖິງໂດຍຊາດກຳເນີດຫຼືໂດຍວິໄນ
ແຕ່ປະກອບຄວາມພຽນໃນພາຍຫຼັງ
ເຂົາຍ່ອມຕົກຢູ່ໃນຫ້ວງແຫ່ງອັນຕະລາຍທີ່ແກ້ໄຂໄດ້ຍາກ

[໑໕໔] ຊ່ອງໂຫວ່ອັນໃຫຍ່ຫຼວງຍ່ອມເກີດແກ່ເຂົາຜູ້ມີປັນຍາງ່ອນແງ່ນ
ເໝືອນຄົນຜູ້ຕົກຢູ່ໃນຄວາມມືດແຫ່ງຣາຕີ
ຍ່ອມເຫັນໄດ້ແຕ່ຮູບຫຍາບ ໆ ເທົ່ານັ້ນ

[໑໕໕] ສ່ວນກຸນລະບຸດຜູ້ຮູ້ແຕ່ການປະກອບຄວາມພຽນ
ໃນສິ່ງທີ່ບໍ່ເປັນສາຣະວ່າເປັນສາຣະ ເຂົາຈະບໍ່ປະສົບຄວາມຮູ້ເລີຍ
ຍ່ອມຕົກຢູ່ໃນຫ້ວງອັນຕະລາຍຢ່າງດຽວເໝືອນກວາງທີ່ຕົກຢູ່ໃນເຂົາວົງກົດ

[໑໕໖] ແມ່ນຫາກວ່າຄົນຜູ້ມີຊາດສະກຸນຕ່ຳ
ແຕ່ເປັນຄົນມີຄວາມຂະຫຍັນໝັ່ນພຽນ
ມີປັນຍາ ສົມບູນດ້ວຍອາຈາຣະແລະສີນ
ກໍຍ່ອມຮຸ່ງເຮື່ອງເໝືອນໄຟໃນຣາຕີ

[໑໕໗] ຂໍພຣະອົງຊົງເຮັດຂໍ້ທີ່ຂ້າພຣະອົງກ່າວແລ້ວນັ້ນ
ໃຫ້ເປັນຂໍ້ປຽບທຽບ ແລ້ວຊົງໃຫ້ພຣະຣາດຊະບຸດດຳຣົງຢູ່ໃນວິຊາ
ກຸນລະບຸດຜູ້ມີປັນຍາຍ່ອມງອກງາມເໝືອນພືດໃນດິນດີແລະນ້ຳຝົນ

**ຈູລະຫັງສະຊາດົກທີ ໖ ຈົບ**

## ໗. ສັດຕິຄຸມພະຊາດົກ (໕໐໖)
## ວ່າດ້ວຍນົກແຂກເຕົ້າຊື່ວ່າສັດຕິຄຸມພະ

(ພຣະສາດສະດາຊົງນຳອະດີດນິທານມາຕັດວ່າ)

[໑໕໘] ພຣະມະຫາຣາດຜູ້ເປັນຈອມທັບແຫ່ງຊາວແຄວ້ນປັນຈາລະ
ຊົງເປັນດັ່ງນາຍພານເນື້ອ ສະເດັດອອກພ້ອມກັບເສນາ
ຊົງຫຼົງກັບໝູ່ຄະນະ ສະເດັດມາຍັງແນວປ່າ

[໑໖໐] ທອດພຣະເນດເຫັນຕູບທີ່ພວກໂຈນສ້າງໄວ້ໃນປ່ານັ້ນ
ນົກແຂກເຕົ້າໄດ້ບິນອອກຈາກຕູບໄປ ກ່າວຄຳເວົ້າທີ່ຫຍາບຊ້າວ່າ

[໑໖໑] ມີກະສັດໜຸ່ມນ້ອຍພ້ອມທັງພາຫະນະ
ມີພຣະກຸນທົນງາມກຸ້ງເກົາດີ
ມີກອບພຣະພັກແດງງາມ
ເໝືອນດວງອາທິດສ່ອງແສງສະຫວ່າງໃນກາງເວັນ

[໑໖໔] ພຣະຣາຊາບັນທົມຫຼັບພ້ອມກັບນາຍສາຣະຖີ
ເອົາເທີ້ນ ພວກເຮົາຈະຮີບຊ່ອຍກັນ
ແຍ່ງຊີງອາພອນຂອງພຣະອົງທັງໝົດ

[໑໖໕] ແມ່ນເວລານີ້ກໍ່ງຽບສະຫງັດເໝືອນເວລາທ່ຽງວັນ
ພຣະຣາຊາບັນທົມຫຼັບຢູ່ພ້ອມກັບນາຍສາຣະຖີ
ພວກເຮົາຊ່ອຍກັນແຍ່ງຊີງພຣະພູສາແລະພຣະກຸນທົນແກ້ວມະນີ
ປີງພະຊົນແລ້ວປົກພຣະສົບດ້ວຍງ່າໄມ້

(ພໍ່ຄົວປະຕິໂກລຳພະໄດ້ຟັງຄຳເວົ້າຂອງລູກນົກແຂກເຕົ້ານັ້ນ ຈຶ່ງອອກໄປເບິ່ງ ຮູ້ວ່າເປັນພຣະຣາຊາຕົກໃຈຢ້ານ ຈຶ່ງກ່າວວ່າ)

[໑໖໔] ເຈົ້າເປັນບ້າໄປແລ້ວຫຼືແນວໃດ ສັດຕິຄຸມພະ ເວົ້າອອກມາໄດ້
ທຳມະດາພຣະຣາຊາທັງຫຼາຍຍາກທີ່ຈະເຂົ້າເຖິງພຣະອົງໄດ້
ເໝືອນດັ່ງໄຟທີ່ລຸກຮຸ່ງເປັນແປວ

(ນົກແຂກເຕົ້າສັດຕິຄຸມພະກ່າວໂຕ້ຕອບພໍ່ຄົວວ່າ)

[໑໖໕] ປະຕິໂກລຳພະ ເມື່ອທ່ານເມົາເວົ້າຄຳໃຫຍ່ອອກມາ
ເມື່ອມານດາຂອງເຮົາເປືອຍກາຍ ທ່ານຈຶ່ງຮັງກຽດໂຈຣະກຳບໍ?

(ພຣະຣາຊາຕື່ນບັນທົມໄດ້ຍິນຄຳເວົ້າຂອງນົກແຂກເຕົ້າ ສັດຕິຄຸມພະເວົ້າກັບພໍ່ຄົວດ້ວຍພາສາມະນຸດປຸກນາຍສາຣະຖີໃຫ້ລຸກຂຶ້ນ ຕັດວ່າ)

[໑໖໖] ລຸກຂຶ້ນເທີ້ນ ນາຍສາຣະຖີເພື່ອນຍາກ ເຈົ້າຈົ່ງຮີບທຽມລົດ
ເຮົາບໍ່ພໍໃຈນົກນີ້ເລີຍ ເຮົາໄປສູ່ອາສົມອື່ນກັນເທີ້ນ

(ນາຍສາຣະຖີລຸກຂຶ້ນທຽມລົດແລ້ວຂາບທູນວ່າ)

[໑໖໗] ຂໍເດຊະພຣະມະຫາຣາດ ຣາດຊະລົດທຽມໄວ້ແລ້ວ
ພາຫະນະອັນຊົງກຳລັງກໍພ້ອມແລ້ວ
ເຊີນສະເດັດຂຶ້ນປະທັບເທີ້ນ ຂ້ານ້ອຍ
ພວກເຮົາຈະພາກັນໄປສູ່ອາສົມອື່ນ

(ນົກແຂກເຕົ້າສັດຕິຄຸມພະເຫັນຣາດຊະລົດແລ່ນໄປຢູ່ເຖິງຄວາມສະຫຼົດໃຈ ຈຶ່ງກ່າວວ່າ)

[໑໖໗] ພວກໂຈນໃນຄ້າຍນີ້ພາກັນໄປໄສໝົດນໍ
ນັ້ນພຣະເຈົ້າປັນຈາລະກຳລັງສະເດັດໜີໄປ
ພົ້ນສາຍຕາພວກໂຈນໄປແລ້ວ

[໑໖໙] ພວກທ່ານຈົ່ງຖືເອົາທະນູ ຫອກ ແລະໂຕມອນ
ນັ້ນພຣະເຈົ້າປັນຈາລະກຳລັງສະເດັດໜີໄປ
ພວກທ່ານຢ່າປ່ອຍໃຫ້ພຣະອົງມີຊີວິດຢູ່

(ພຣະສາດສະດາຊົງປະກາດຂໍ້ຄວາມນີ້ວ່າ)

[໑໗໐] ຄັ້ງນັ້ນ ນົກແຂກເຕົ້າອີກຕົວໜຶ່ງເຊິ່ງມີປາກແດງ
ຍິນດີຕ້ອນຮັບດ້ວຍກ່າວວ່າ
ພຣະມະຫາຣາດ ພຣະອົງສະເດັດມາດີແລ້ວ ບໍ່ໄດ້ສະເດັດມາຮ້າຍ
ພຣະອົງຜູ້ຊົງເປັນໃຫຍ່ ສະເດັດມາເຖິງແລ້ວໂດຍລຳດັບ
ສິ່ງຂອງທີ່ມີຢູ່ໃນອາສົມນີ້ ຂໍພຣະອົງສະເຫວີຍເທີ້ນ

[໑໗໑] ຄື ໝາກພັບ ໝາກຫາດ ໝາກຊາງ ໝາກເມົ່າ
ແລະໝາກໄມ້ທັງຫຼາຍທີ່ມີຣົດພໍສົມຄວນ
ຂໍພຣະອົງສະເຫວີຍໝາກໄມ້ທີ່ດີ ໆ ເທີ້ນຂ້ານ້ອຍ

[໑໗໒] ນີ້ນ້ຳເຢັນນຳມາຈາກຮ່ອມພູ ພຣະມະຫາຣາດ
ຂໍພຣະອົງຊົງດື່ມເທີ້ນ ຖ້າພຣະອົງຊົງປະສົງ
[໑໗໓] ລືສີທັງຫຼາຍໃນອາສົມນີ້ພາກັນໄປປ່າ
ເພື່ອສະແຫວງຫາມູນຜະລາຫານ
ຂໍພຣະອົງສະເດັດລຸກຂຶ້ນຈັບເອົາເອງເທີ້ນ
ຂ້າພຣະອົງບໍ່ມີມືຈະທູນຖວາຍ

(ພຣະຣາຊາຊົງເຫຼື້ອມໃສການປະຕິສັນຖານຂອງນົກປຸບຜະກະ ຈຶ່ງຊົງຊົມເຊີຍວ່າ)

[໑໗໔] ປັກສາຕົວນີ້ດີແທ້ນໍ ເປັນນົກແຕ່ຊົງທຳຢ່າງປະເສີດ
ສ່ວນເຈົ້ານົກແຂກເຕົ້າຕົວໜຶ່ງນັ້ນເວົ້າແຕ່ຄຳຫຍາບຊ້າວ່າ

[໑໗໕] ຈົ່ງຂ້າມັນ ຈົ່ງມັດມັນ ຢ່າປ່ອຍໃຫ້ມັນມີຊີວິດຢູ່
ເມື່ອມັນຈົ່ມຮ້ອງຢູ່ຢ່າງນີ້
ເຮົາໄດ້ເຖິງອາສົມນີ້ໂດຍຄວາມປອດໄພ

(ນົກປຸບຜະກະເມື່ອໄດ້ຟັງພຣະຣາດຊະດຳຣັດແລ້ວ ຈຶ່ງຂາບທູນວ່າ)

[໑໗໖] ພຣະມະຫາຣາດ ຂ້າພຣະອົງທັງ ໔
ເປັນອ້າຍນ້ອງຮ່ວມທ້ອງມານດາດຽວກັນ
ຈະເລີນເຕີບໃຫຍ່ຢູ່ທີ່ຕົ້ນໄມ້ຕົ້ນດຽວກັນ
ແຕ່ພັດຕົກໄປຢູ່ຕ່າງເຂດແດນກັນ

[໑໗໗] ນົກສັດຕິຄຸມພະຈະເລີນເຕີບໃຫຍ່ໃນແດນໂຈນ
ສ່ວນຂ້າພຣະອົງຈະເລີນເຕີບໃຫຍ່ຢູ່ໃນສຳນັກຂອງລືສີ ໃນບ່ອນນີ້
ນົກສັດຕິຄຸມພະນັ້ນຢູ່ໃກ້ອະສັດຕະບຸຣຸດ
ຂ້າພຣະອົງຢູ່ໃກ້ສັດຕະບຸຣຸດ
ຍ້ອນເຫດນັ້ນ ຂ້າພຣະອົງທັງ ໔ ຈຶ່ງແຕກຕ່າງກັນໂດຍທຳ

(ນົກປຸບຜະກະຈຳແນກທຳນັ້ນວ່າ)

[໑໗໘] ບ່ອນໃດມີແຕ່ການຂ້າ ການຈອງຈຳ ການຫຼອກລວງດ້ວຍຂອງປອມ
ການຫຼອກລວງເຊິ່ງ ໆ ໜ້າ ການປຸ້ນຂ້າເຈົ້າຊັບ
ແລະການຂົ່ມຂູ່ກະທຳທາຣຸນຢ່າງແສນສາຫັດ
ນົກສັດຕິຄຸມພະນັ້ນຕັ້ງໃຈຮູ້ແຕ່ການກະທຳເຫຼົ່ານັ້ນໃນບ່ອນນັ້ນ

[໑໗໙] ບ່ອນນີ້ມີແຕ່ຄວາມຈິງ ສຸດຈະຣິດທຳ ຄວາມບໍ່ບຽດບຽນ
ຄວາມສັງລວມ ແລະການເຝິກຝົນອິນຊີ
ພຣະອົງຜູ້ຊົງເປັນໜໍ່ເນື້ອແຫ່ງພຣະຣາດຊະວົງ
ຂ້າພຣະອົງຈະເລີນເຕີບໃຫຍ່ຢູ່ເທິງຕັກຂອງລືສີ
ຜູ້ມີປົກກະຕິໃຫ້ອາສະນະແລະນ້ຳ

(ບັດນີ້ເມື່ອຈະສະແດງທຳຖວາຍພຣະຣາຊາ ຈຶ່ງກ່າວວ່າ)

[໑໘໐] ຂໍເດຊະພຣະຣາຊາ ທຳມະດາບຸກຄົນຄົບຫາຄົນໃດ ໆ
ເປັນສັດຕະບຸຣຸດກໍຕາມ ອະສັດຕະບຸຣຸດກໍຕາມ ມີສິນກໍຕາມ ບໍ່ມີສິນກໍຕາມ
ຍ່ອມເປັນໄປຕາມອຳນາດຂອງຄົນນັ້ນນັ້ນເອງ

[໑໘໑] ບຸກຄົນເຮັດຄົນເຊັ່ນໃດໃຫ້ເປັນມິດ
ແລະຄົບຫາຄົນສະນິດກັບຄົນເຊັ່ນໃດ
ເຖິງເຂົາກໍເປັນເຊັ່ນຄົນນັ້ນ
ຍ້ອນການຢູ່ຮ່ວມກັນເປັນເຊັ່ນນັ້ນ

[໑໗໔] ຄົນຊົ່ວໃຜຄົບເຂົ້າຍ່ອມເປື້ອນຄົນຄົບ ເຊິ່ງບໍ່ໄດ້ເປື້ອນມາແຕ່ເດີມ
ຄົນຊົ່ວໃຜສຳຜັດຖືກຕ້ອງ ຫຼືເມື່ອສຳຜັດຖືກຕ້ອງຄົນອື່ນ
ກໍຍ່ອມເປື້ອນຄົນທີ່ຕົນສຳຜັດຖືກຕ້ອງ ເຊິ່ງບໍ່ໄດ້ເປື້ອນມາແຕ່ເດີມ
ເໝືອນລູກສອນທີ່ກຳຊາບທາດ້ວຍຢາພິດກໍພອຍແປດເປື້ອນແລ່ງໄປດ້ວຍ
ຍ້ອນຢ້ານແຕ່ການແປດເປື້ອນ
ນັກປາດຈຶ່ງບໍ່ຄວນມີຄົນຊົ່ວເປັນເພື່ອນ

[໑໗໓] ຄົນໃດຫໍ່ປາເນົ່າດ້ວຍໃບຫຍ້າຄາ
ແມ່ນໃບຫຍ້າຄາກໍພອຍມີກິ່ນເໝັນເນົ່າຟຸ້ງໄປດ້ວຍ
ການຄົບຫາຄົນພານກໍເປັນສັນນັ້ນ

[໑໗໔] ສ່ວນຄົນໃດຫໍ່ເກດສະໜາດ້ວຍໃບໄມ້
ແມ່ນໃບໄມ້ກໍພອຍມີກິ່ນຫອມຟຸ້ງໄປດ້ວຍ
ການຄົບຫາກັບນັກປາດກໍເປັນເຊັ່ນນັ້ນ

[໑໗໕] ຍ້ອນເຫດນັ້ນ ບັນດິດຮູ້ການຄົບຂອງຕົນ
ເໝືອນກັບໃບໄມ້ຫໍ່ສິ່ງຂອງແລ້ວ
ບໍ່ເພິ່ງເຂົ້າໄປຄົບຫາອະສັດຕະບຸຣຸດ
ເພິ່ງຄົບຫາແຕ່ສັດຕະບຸຣຸດ
ຍ້ອນອະສັດຕະບຸຣຸດຍ່ອມນຳໄປສູ່ນະຣົກ
ສ່ວນສັດຕະບຸຣຸດຍ່ອມຊ່ອຍໃຫ້ໄປເຖິງສຸກຄະຕິ

**ສັດຕຸມພະຊາດົກທີ ໗ ຈົບ**

## ໗. ພັນລາຕິຍະຊາດົກ (໕໐໔)
## ວ່າດ້ວຍພຣະຣາຊາພະນາມວ່າພັນລາຕິຍະ

(ພຣະສາດສະດາຊົງນຳອະດີດນິທານມາຕັດວ່າ)

[໑໗໖] ໄດ້ມີພຣະຣາຊາຊົງພະນາມວ່າພັນລາຕິຍະ
ພຣະອົງຊົງລະອັດສີມາ
ໄດ້ສະເດັດປະພາດປ່າລ່າເນື້ອ
ສະເດັດເຖິງພູເຂົາຄັນທະມາດວະຣະຄີຣີ
ເຊິ່ງມີບຸບຜະຊາດນານາພັນບານສະພັ່ງ
ເປັນແດນທີ່ພວກກິນນະຣະສັນຈອນໄປມາ

[໑໗໗] ພຣະອົງຊົງປະສົງຈະຕັດຖາມ
ຈຶ່ງຊົງຫ້າມຝູງໝາ
ຊົງເກັບລູກທະນູແລະແລ່ງ
ສະເດັດເຂົ້າໄປໃກ້ສະຖານທີ່ທີ່ກິນນະຣະ ໔ ຜົວເມຍຢູ່

[໑໗໙] ລ່ວງລະດູເຫມັນໄປແລ້ວ ທີ່ແຄມຝັ່ງແມ່ນ້ຳເນວະດີແຫ່ງນີ້
ເຈົ້າທັງ ໔ ຍັງເປີກສາກັນຢູ່ເນືອງ ໆ ຢູ່ບໍ່ນໍ?
ເຮົາຂໍຖາມເຈົ້າທັງ ໔ ຜູ້ມີຮ່າງກາຍຄ້າຍມະນຸດ
ໃນມະນຸດໂລກເຂົາຮູ້ຈັກເຈົ້າທັງ ໔ ວ່າຈັ່ງໃດ?

(ຝ່າຍກິນນະຣີໄດ້ຟັງພຣະດຳຣັດຈຶ່ງສົນທະນາກັບພຣະຣາຊາວ່າ)

[໑໗໘] ພວກເຮົາເປັນມະຣຶຄະມີຮ່າງກາຍຄ້າຍມະນຸດ
ທ່ອງທ່ຽວໄປຕາມແມ່ນ້ຳທັງຫຼາຍ
ຄື ມັນລະຄິຣີນະທີ ປັນຖະນະກະນະທີ ຕະຣີກູຕະນະທີ ເຊິ່ງມີນ້ຳເຢັນ
ພໍ່ພານ ຊາວໂລກເຂົາຮູ້ຈັກພວກເຮົາວ່າ ກິນນະຣີ

(ລຳດັບນັ້ນ ພຣະຣາຊາໄດ້ຕັດວ່າ)

[໑໘໐] ເຈົ້າທັງ ໔ ເໝືອນຄົນມີຄວາມທຸກຢ່າງແສນສາຫັດ
ພາກັນຄ່ຳຄວນຢູ່
ສວມກອດກັນເໝືອນຄົນຮັກກັບຄົນຮັກ
ເຮົາຂໍຖາມເຈົ້າທັງ ໔ ຜູ້ມີຮ່າງກາຍຄ້າຍມະນຸດ
ເຫດໃດ ເຈົ້າທັງ ໔ ຈຶ່ງພາກັນຮ້ອງໄຫ້ບໍ່ສ່າງຊາຢູ່ໃນປ່ານີ້

[໑໘໑] ເຈົ້າທັງ ໔ ເໝືອນຄົນມີຄວາມທຸກຢ່າງແສນສາຫັດ
ພາກັນຄ່ຳຄວນຢູ່ ສວມກອດກັນເໝືອນຄົນຮັກກັບຄົນຮັກ
ເຮົາຂໍຖາມເຈົ້າທັງ ໔ ຜູ້ມີຮ່າງກາຍຄ້າຍມະນຸດ
ເຫດໃດ ເຈົ້າທັງ ໔ ຈຶ່ງພາກັນເພີ້ລຳພັນບໍ່ສ່າງຊາຢູ່ໃນປ່ານີ້

[໑໘໔] ເຈົ້າທັງ ໔ ເໝືອນຄົນມີຄວາມທຸກຢ່າງແສນສາຫັດ
ພາກັນຄ່ຳຄວນຢູ່ ສວມກອດກັນເໝືອນຄົນຮັກກັບຄົນຮັກ
ເຮົາຂໍຖາມເຈົ້າທັງ ໔ ຜູ້ມີຮ່າງກາຍຄ້າຍມະນຸດ
ເຫດໃດ ເຈົ້າທັງ ໔ ຈຶ່ງພາກັນເສົ້າໂສກບໍ່ສ່າງຊາຢູ່ໃນປ່ານີ້

(ກິນນະຣີຂາບທູນວ່າ)

[໑໙໓]  ພໍ່ພານ ເຮົາທັງ ໔ ພັດພາກກັນຢູ່ໜຶ່ງຣາຕີ
ບໍ່ຢາກຈະພັດພາກຈາກກັນ ເມື່ອຣະນຶກເຖິງກັນແລະກັນ
ຈຶ່ງພາກັນເດືອດຮ້ອນເສົ້າໂສກຢູ່ຕະຫຼອດຣາຕີໜຶ່ງນັ້ນ
ຣາຕີນັ້ນຈັກບໍ່ມີອີກ

(ພຣະຣາຊາຕັດຖາມວ່າ)

[໑໙໔]  ເຈົ້າທັງ ໔ ຄິດເຖິງຊັບທີ່ພິນາດໄປແລ້ວບໍ
ຫຼືຄິດເຖິງບິດາມານດາທີ່ລ່ວງລັບໄປແລ້ວ
ຈຶ່ງພາກັນເດືອດຮ້ອນຕະຫຼອດທັງຣາຕີໜຶ່ງນັ້ນ
ເຮົາຂໍຖາມເຈົ້າທັງ ໔ ຜູ້ມີຮ່າງກາຍຄ້າຍມະນຸດ
ຍ້ອນເຫດໃດ ເຈົ້າຈຶ່ງແຍກກັນຢູ່

(ກິນນະຣີຂາບທູນວ່າ)

[໑໙໕]  ແມ່ນ້ຳສາຍນີ້ໃດມີກະແສນ້ຳໄຫຼແຮງ
ປົກຄຸມດ້ວຍຕົ້ນໄມ້ນານາພັນໄຫຼຜ່ານພູຜາຫີນ ທ່ານເຫັນຢູ່
ແມ່ນ້ຳສາຍນັ້ນ ສາມີທີ່ຮັກຂອງຂ້ານ້ອຍສຳຄັນຂ້ານ້ອຍວ່າ
ຈະຕິດຕາມໄປຈຶ່ງໄດ້ຂ້າມໄປໃນລະດູຝົນ

[໑໙໖]  ສ່ວນຂ້ານ້ອຍມົວເລືອກເກັບດອກຕາປູ່ ດອກລຳດວນ
ດອກມະລິຊ້ອນ ແລະດອກຄັດເຄົ້າ ດ້ວຍຫວັງວ່າ
ສາມີທີ່ຮັກຂອງຂ້ານ້ອຍຈັກໄດ້ປະດັບດອກໄມ້
ແລະຂ້ານ້ອຍຈັກປະດັບດອກໄມ້ ນອນແນບຂ້າງສາມີນັ້ນ

[໑໙໗]  ອັນໜຶ່ງ ຂ້ານ້ອຍມົວເລືອກເກັບດອກບານບໍ່ຮູ້ໂຮຍ
ດອກຄູນ ດອກແຄຝອຍ
ແລະດອກເຄືອໄມ້ ດ້ວຍຫວັງວ່າ
ສາມີທີ່ຮັກຂອງຂ້ານ້ອຍຈັກໄດ້ປະດັບດອກໄມ້
ແລະຂ້ານ້ອຍຈັກປະດັບດອກໄມ້ນອນແນບຂ້າງສາມີນັ້ນ

[໑໙໘]  ອັນໜຶ່ງ ຂ້ານ້ອຍມົວເລືອກເກັບດອກສາລະທີ່ກຳລັງເບ່ງບານ
ແລ້ວຮ້ອຍເປັນພວງມາໄລ ດ້ວຍຫວັງວ່າ

ສາມີທີ່ຮັກຂອງຂ້ານ້ອຍຈັກສວມພວງມາໄລ
ແລະຂ້ານ້ອຍຈັກສວມພວງມາໄລນອນແນບຂ້າງສາມີນັ້ນ

[໑໙໙] ອັນໜຶ່ງ ຂ້ານ້ອຍມົວເລືອກເກັບດອກສາລະທີ່ກຳລັງເບ່ງບານ
ແລ້ວຮ້ອຍເປັນເຄື່ອງຮອງຮັບ ດ້ວຍຫວັງວ່າ
ດອກໄມ້ທີ່ຮ້ອຍແລ້ວນີ້ແລ ຈັກເປັນເຄື່ອງປູລາດສຳລັບເຮົາທັງ ໒
ໃນສະຖານທີ່ທີ່ເຮົາທັງ ໒ ຈັກຢູ່ຮ່ວມກັນຕະຫຼອດຄືນໃນວັນນີ້

[໒໐໐] ອັນໜຶ່ງ ຂ້ານ້ອຍມົວເລີນເລີ່ບົດໄມ້ເກດສະໜາແລະໄມ້ຈັນທີ່ສີລາ
ດ້ວຍຫວັງວ່າ ສາມີທີ່ຮັກຂອງຂ້ານ້ອຍຈັກໃຊ້ຊະໂລມກາຍ
ແລະຂ້ານ້ອຍກໍຈັກໃຊ້ຊະໂລມກາຍນອນແນບຂ້າງສາມີ

[໒໐໑] ຄັ້ງນັ້ນ ນ້ຳເຊິ່ງມີກະແສໄຫຼແຮງໄດ້ໄຫຼບ່າມາ
ພັດພາເອົາດອກສາລະ ດອກສົນ
ແລະດອກກັນນິກາໄປ ໂດຍບຶດດຽວນັ້ນນ້ຳກໍເຕັມຝັ່ງ
ຈຶ່ງເປັນການຍາກຍິ່ງທີ່ຂ້ານ້ອຍຈະຂ້າມແມ່ນ້ຳສາຍນີ້ໄປໄດ້

[໒໐໒] ເວລານັ້ນ ເຮົາທັງ ໒ ຢືນແນມກັນແລະກັນຢູ່ທີ່ແຄມຝັ່ງທັງ ໒
ບາງເວລາກໍຮ້ອງໄຫ້ ບາງເວລາກໍຮ່າເຮີງຍິນດີ
ຣາຕີນັ້ນໄດ້ຜ່ານໄປຢ່າງຍາກລຳບາກສຳລັບເຮົາທັງ ໒

[໒໐໓] ພໍ່ພານ ພໍດວງອາທິດຂຶ້ນໃນຕອນເຊົ້າມືດ ແມ່ນ້ຳແຫ້ງ
ເຮົາທັງ ໒ ຈຶ່ງຂ້າມໄປໄດ້ ສວມກອດກັນແລະກັນ
ທັງຮ້ອງໄຫ້ ທັງຮ່າເຮີງຍິນດີ

[໒໐໔] ພໍ່ພານ ໖໙໗ ປີ ເມື່ອກ່ອນ
ເຮົາທັງ ໒ ພັດພາກັນຢູ່ໃນບ່ອນນີ້
ຂ້າແດ່ພຣະພູບານ ຊີວິດນີ້ພຽງ ໑໐໐ ປີທໍ່ນັ້ນ
ໃຜນໍຈະເພິ່ງເວັ້ນຈາກພັນລະຍາທີ່ໜ້າຮັກແພງ ຢູ່ໃນບ່ອນນີ້ໄດ້ນໍ

(ພຣະຣາຊາຕັດຖາມວ່າ)

[໒໐໕] ກໍອາຍຸຂອງພວກເຈົ້າມີປະມານເທົ່າໃດນໍ ເພື່ອນຮັກ
ຫາກພວກເຈົ້າຮູ້ກໍຈົ່ງບອກ
ເຈົ້າທັງ ໒ ຢ່າໄດ້ຫວັ່ນໄຫວ ຈົ່ງບອກອາຍຸແກ່ເຮົາ
ຕາມທີ່ໄດ້ຍິນໄດ້ຟັງມາຈາກບຸກຄົນ ຫຼືຈາກຕຳລາ

(ກິນນະຣີຂາບທູນວ່າ)

[໔໐໖]　ພໍ່ພານ ກໍອາຍຸຂອງພວກເຮົາມີປະມານ ໑,໐໐໐ ປີ
ພະຍາດອັນຮ້າຍແຮງກໍບໍ່ມີໃນລະຫວ່າງ
ຄວາມທຸກກໍມີໜ້ອຍ ມີແຕ່ຄວາມສຸກຍິ່ງ ໆ ຂຶ້ນໄປ
ເຮົາທັງ ໔ ຍັງຮັກແພງກັນບໍ່ຈືດຈາງຈະຕ້ອງພາກັນລະຊີວິດໄປ

(ພຣະສາດສະດາຊົງປະກາດຄວາມຂໍ້ນີ້ວ່າ)

[໔໐໗]　ກໍພຣະເຈົ້າພັນລາຕິຍະຊົງສະດັບຄຳເວົ້າຂອງອະມະນຸດທັງຫຼາຍ
ຊົງດຳຣິວ່າ ຊີວິດເປັນຂອງໜ້ອຍດຽວ ຈຶ່ງສະເດັດກັບ ບໍ່ສະເດັດໄປລ່າເນື້ອ
ຊົງພ່ຳເພັງທານ ສະເຫວີຍໂພຄະ

(ພຣະສາດສະດາເມື່ອຕັດພຣະຄາຖານີ້ແລ້ວ ຊົງໂອວາດພຣະເຈົ້າໂກສົນກັບພຣະນາງມັນລິກາເທວີວ່າ)

[໔໐໘]　ກໍມະຫາບໍພິດທັງ ໔ ຊົງສະດັບຄຳເວົ້າຂອງອະມະນຸດທັງຫຼາຍ
ຈົ່ງຊົງເບີກບານພຣະຫະໄທເທີ້ນ ຢ່າຊົງຜິດຖຽງກັນເລີຍ
ຄວາມຜິດຍ້ອນການທຳຂອງຕົນ
ຢ່າເຮັດໃຫ້ມະຫາບໍພິດທັງ ໔ ຕ້ອງເດືອດຮ້ອນ
ເໝືອນຄວາມຜິດຍ້ອນການກະທຳຂອງຕົນ
ເຮັດໃຫ້ກິນນະຣະທັງ ໔ ຕ້ອງເດືອດຮ້ອນຕະຫຼອດຣາຕີໜຶ່ງເລີຍ

[໔໐໙]　ອັນໜຶ່ງ ພຣະອົງທັງ ໔ ຊົງສະດັບຄຳເວົ້າຂອງອະມະນຸດທັງຫຼາຍແລ້ວ
ຈົ່ງຊົງເບີກບານພຣະຫະໄທເທີ້ນ ຢ່າຊົງວິວາດກັນເລີຍ
ຄວາມຜິດຍ້ອນການກະທຳຂອງຕົນ
ຢ່າເຮັດໃຫ້ມະຫາບໍພິດທັງ ໔ ຕ້ອງເດືອດຮ້ອນ
ເໝືອນຄວາມຜິດຍ້ອນການກະທຳຂອງຕົນ
ເຮັດໃຫ້ກິນນະຣະທັງ ໔ ຕ້ອງເດືອດຮ້ອນຕະຫຼອດຣາຕີໜຶ່ງເລີຍ

(ພຣະນາງມັນລິກາເທວີສະດັບພຣະທຳມະເທດສະໜາຂອງພຣະຕະຖາຄົດເຈົ້າແລ້ວ ສະເດັດລຸກຈາກອາສະນະ ປະຄອງອັນຊະລີ ຊົງຊົມເຊີຍພຣະທົດສະພົນວ່າ)

[໔໑໐]　ຂ້ານ້ອຍສະດັບພຣະທຳມະເທດສະໜາມີປະການຕ່າງ ໆ ມີໃຈຊື່ນຊົມຍິນດີ
ພຣະດຳຣັດຕ່າງ ໆ ຂອງພຣະອົງປະກອບໄປດ້ວຍປະໂຫຍດ

ພຣະອົງເມື່ອຊົງເປ່ງພຣະວາຈາອອກມາ
ຍ່ອມບັນເທົາຄວາມກະວົນກະວາຍໃຈຂອງຂ້ານ້ອຍໄດ້
ພຣະມະຫາສະມະນະຜູ້ນຳຄວາມສຸກມາໃຫ້ຂ້ານ້ອຍ
ຂໍພຣະອົງຊົງຈະເລີນພະຊົນຊີບຍັ່ງຍືນນານເທີ້ນ

**ພັນລາຕິຍະຊາດົກທີ ໙ ຈົບ**

# ໗. ໂສມະນັດສະຊາດົກ (໔໐໕)
# ວ່າດ້ວຍໂສມະນັດກຸມານ

(ພຣະຣາຊາຕັດວ່າ)

[໔໑໑] ໃຜມາບຽດບຽນຂົ່ມເຫັງທ່ານ
ເປັນຫຍັງທ່ານຈຶ່ງເສຍໃຈ ເສົ້າໂສກ ບໍ່ຊື່ນບານເລີຍ
ວັນນີ້ ມານດາບິດາຂອງທ່ານຄືມາຮ້ອງໄຫ້ຢູ່ນໍ?
ຫຼືວ່າ ໃຜມາຂົ່ມເຫັງ ເຮັດໃຫ້ທ່ານຕ້ອງນອນຢູ່ພື້ນດິນ

(ຊະດິນໂກງໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໔໑໔] ຂໍຖວາຍພຣະພອນ ອາດຕະມາມີຄວາມຍິນດີທີ່ໄດ້ພົບເຫັນພຣະອົງ
ຂໍຖວາຍພຣະພອນພຣະພູມິບານ ນານແທ້ຈຶ່ງໄດ້ພົບພຣະອົງ
ຂໍຖວາຍພຣະພອນພຣະເຈົ້າເຣນູ ອາດຕະມາບໍ່ໄດ້ບຽດບຽນຜູ້ໃດ
ແຕ່ຖືກພຣະໂອຣົດຂອງພຣະອົງເຂົ້າມາບຽດບຽນ

(ພຣະຣາຊາຕັດວ່າ)

[໔໑໕] ພະນັກງານເຝົ້າປະຕູທີ່ຕິດຕາມ
ແລະເຫຼົ່າເພດຊະຄາດ
ຈົ່ງໄປສູ່ພາຍໃນພຣະຣາດຊະຖານ
ຈົ່ງຂ້າເຈົ້າໂສມະນັດກຸມານນັ້ນແລ້ວຕັດຫົວນຳມາ

(ເພິ່ງຮູ້ຄາຖາປະພັນດັ່ງຕໍ່ໄປນີ້)

[໔໑໔] ຣາດຊະທູດທັງຫຼາຍທີ່ຊົງສັ່ງໄປໄດ້ຂາບທູນ
ພຣະຣາດຊະກຸມານນັ້ນວ່າ ຂໍເດຊະພຣະຂັດຕິຍະກຸມານ

ພຣະອົງຖືກພຣະຣາດຊະບິດາຜູ້ເປັນອິດສະຣາທິບໍດີຕັດຂາດແລ້ວ
ຕ້ອງໂທດປະຫານຊີວິດ

[໔໑໕] ພຣະຣາດຊະບຸດນັ້ນຊົງກັນແສງຄໍ່າຄວນ
ຍົກນິ້ວທັງ ໑໐ ປະຄອງອັນຊະລີອ້ອນວອນວ່າ
ຂ້າພະເຈົ້າປາຖະໜາຈະເຝົ້າພຣະຈອມຊົນ
ຂໍພວກທ່ານຈົ່ງນໍາຂ້າພະເຈົ້າຜູ້ຍັງມີຊີວິດຢູ່ສະແດງຕໍ່ພຣະອົງເທີ້ນ

[໔໑໖] ຣາດຊະທູດເຫຼົ່ານັ້ນຟັງພຣະດໍາຣັດຂອງພຣະຣາດຊະກຸມານນັ້ນແລ້ວ
ໄດ້ສະແດງພຣະຣາດຊະບຸດຕໍ່ພຣະຣາຊາ
ສ່ວນພຣະຣາດຊະບຸດຊົງເຫັນພຣະບິດາແລ້ວ ຂາບທູນແຕ່ໄກວ່າ

[໔໑໗] ຂໍເດຊະພຣະອົງຜູ້ຈອມຊົນ ພະນັກງານເຝົ້າປະຕູທີ່ຕິດດາບ
ແລະເຫຼົ່າເພດຊະຄາດມາເພື່ອຈະຂ້າຂ້ານ້ອຍ
ຂ້ານ້ອຍຂໍຂາບທູນຖາມ ຂໍພຣະອົງໂຜດບອກເນື້ອຄວາມນັ້ນ
ວັນນີ້ຂ້ານ້ອຍມີຄວາມຜິດອັນໃດນໍໃນເລື້ອງນີ້

(ພຣະຣາຊາຕັດບອກຄວາມຜິດວ່າ)

[໔໑໘] ດາບົດຜູ້ບໍ່ຜະໝາດ ທໍາການທົດນໍ້າ
ແລະບໍາເລີໄຟທັງຄໍ່າແລະເຊົ້າໃນການທຸກເມື່ອ
ເປັນຫຍັງເຈົ້າຈຶ່ງຮ້ອງຮຽກທ່ານຜູ້ສັງລວມ
ເຊິ່ງປະພຶດພົມມະຈັນເຊັ່ນນັ້ນວ່າເປັນຄະຫະບໍດີນໍ?

(ພຣະຣາດຊະກຸມານຂາບທູນວ່າ)

[໔໑໙] ຂໍເດຊະພຣະອົງຜູ້ສົມມຸດຕິເທບ
ດາບົດຜູ້ນີ້ມີຂອງເກັບລວບລວມໄວ້ຫຼາຍຊະນິດ
ເຊັ່ນ ສົ້ມມໍພິເພກ ຮາກໄມ້ ແລະໝາກໄມ້ນານາຊະນິດ
ທ່ານບໍ່ຜະໝາດ ເຝົ້າຮັກສາຄຸ້ມຄອງສິ່ງຂອງເຫຼົ່ານັ້ນໄວ້
ຍ້ອນເຫດນັ້ນ ຂ້ານ້ອຍຈຶ່ງຮ້ອງຮຽກທ່ານວ່າເປັນຄະຫະບໍດີ

(ພຣະຣາຊາຊົງຮູ້ວ່າພຣະໂພທິສັດບໍ່ມີຄວາມຜິດຈຶ່ງຕັດວ່າ)

[໔໒໐] ກຸມານ ຄໍາທີ່ເຈົ້າເວົ້າເປັນຄວາມຈິງ

ດາບົດຜູ້ນີ້ມີຂອງເກັບລວບລວມໄວ້ຫຼາຍຊະນິດ
ທ່ານບໍ່ຜະໝາດ ເຝົ້າຮັກສາຄຸ້ມຄອງສິ່ງຂອງເຫຼົ່ານັ້ນໄວ້
ຍ້ອນເຫດນັ້ນ ທ່ານຈຶ່ງຊື່ວ່າເປັນພານ ເປັນຄະຫະບໍດີ

(ພຣະໂພທິສັດນອບນ້ອມບໍລິສັດແລ້ວຕັດວ່າ)

[໔໔໑] ຂໍບໍລິສັດທັງຫຼາຍພ້ອມທັງຊາວນິຄົມແລະຊາວຊົນນະບົດທັງປວງ
ທີ່ມາປະຊຸມພ້ອມກັນຈົ່ງຟັງຂ້າພະເຈົ້າ
ພຣະຣາຊາຜູ້ຈອມຊົນພຣະອົງນີ້ເປັນພານ
ຊົງຟັງຄຳຂອງດາບົດຜູ້ເປັນພານແລ້ວ
ຮັບສັ່ງໃຫ້ປະຫານຂ້າພະເຈົ້າໂດຍບໍ່ແມ່ນເຫດ

(ຕໍ່ມາພຣະໂພທິສັດທູນຂໍບໍຣົມຣາຊານຸຍາດບວດວ່າ)

[໔໔໔] ເມື່ອຮາກຍັງໝັ້ນຄົງຈະເລີນງອກງາມແຜ່ໄພສານຢູ່
ກໍໄຜ່ທີ່ແຕກງ່າກ້ານສາຂາກໍຍາກທີ່ຈະຖອນໃຫ້ໝົດສິ້ນໄດ້
ຂໍເດຊະພຣະອົງຜູ້ຈອມຊົນ
ຂ້ານ້ອຍຂໍຖວາຍບັງຄົມພຣະບາດທັງສອງຂອງພຣະອົງ
ຂໍພຣະອົງໂຜດພຣະຣາດຊະທານພຣະບໍຣົມຣາຊານຸຍາດໃຫ້ຂ້ານ້ອຍບວດເທີ້ນ

(ພຣະຣາຊາຕັດວ່າ)

[໔໔໓] ເຈົ້າຈົ່ງສະເຫວີຍໂພຄະອັນໄພບູນເທີ້ນ ກຸມານ
ພໍ່ຈະມອບຄວາມເປັນໃຫຍ່ໃຫ້ເຈົ້າທຸກຢ່າງ
ເຈົ້າຈົ່ງເປັນພຣະຣາຊາຂອງຊົນຊາວກຸຣຸໃນວັນນີ້ເທີ້ນ
ຢ່າບວດເລີຍ ຍ້ອນການບວດເປັນທຸກ

(ພຣະໂພທິສັດຜູ້ເປັນພຣະໂອຣົດຊາບທູນວ່າ)

[໔໔໔] ຂໍເດຊະພຣະອົງຜູ້ສົມມຸດຕິເທບ
ໂພຄະທັງຫຼາຍຂອງພຣະອົງໃນພຣະນະຄອນນີ້
ທີ່ຂ້ານ້ອຍຄວນຈະບໍຣິໂພກໃຊ້ສອຍມີຢູ່ບໍ່ນໍ?
ໃນຊາດກ່ອນ ຂ້ານ້ອຍໄດ້ຣື່ນຣົມດ້ວຍ ຮູບ ສຽງ ກິ່ນ ຣົດ
ແລະຜັດສະ ອັນໜ້າຣື່ນຣົມໃຈຢູ່ໃນເທວະໂລກ

[໘໘໕] ຂໍເດຊະພຣະອົງຜູ້ສົມມຸດຕິເທບ ໂພຄະທັງຫຼາຍ
ໃນເທວະໂລກຊັ້ນດາວວະດຶງ ຂ້ານ້ອຍກໍບໍຣິໂພກໃຊ້ສອຍມາແລ້ວ
ແລະຂ້ານ້ອຍກໍມີໝູ່ເທບອັບປະສອນແວດລ້ອມບໍາເລີແລ້ວ
ອັນໜຶ່ງ ຂ້ານ້ອຍຮູ້ວ່າ ພຣະອົງເປັນພານ ຖືກຜູ້ອື່ນແນະນໍາ
ຈຶ່ງບໍ່ຄວນຢູ່ໃນຣາດຊະສະກຸນເຊັ່ນນັ້ນ

(ພຣະຣາຊາຕັດວ່າ)

[໘໘໖] ຫາກພໍ່ເປັນຄົນພານ ຖືກຜູ້ອື່ນແນະນໍາແລ້ວ
ລູກຮັກ ເຈົ້າຈົ່ງອົດໂທດໃຫ້ພໍ່ຈັກເທື່ອເທີ້ນ ຖ້າພໍ່ເປັນເຊັ່ນນີ້ອີກ
ເຈົ້າຈົ່ງເຮັດຕາມຄວາມຄິດຂອງເຈົ້າເທີ້ນ ໂສມະນັດ

(ພຣະໂພທິສັດຖວາຍໂອວາດພຣະຣາດຊະບິດາວ່າ)

[໘໘໗] ວຽກງານທີ່ບຸກຄົນບໍ່ພິຈາຣະນາກ່ອນແລ້ວຈຶ່ງເຮັດ
ບໍ່ໄຕ່ຕອງກ່ອນຄິດ ຜົນຍ່ອມຊົ່ວຊາມເໝືອນຢາເສື່ອມຄຸນນະພາບ

[໘໘໘] ວຽກງານທີ່ບຸກຄົນພິຈາຣະນາກ່ອນແລ້ວຈຶ່ງເຮັດ
ໄຕ່ຕອງໂດຍຊອບກ່ອນແລ້ວຄິດ
ຜົນຍ່ອມຈະເລີນເໝືອນຢາບໍ່ເສື່ອມຄຸນນະພາບ

[໘໘໙] ຄະລືຫັດຜູ້ບໍຣິໂພກກາມຂີ້ຄ້ານບໍ່ດີ
ບັນພະຊິດບໍ່ສັງລວມບໍ່ດີ
ພຣະຣາຊາບໍ່ຊົງພິຈາຣະນາກ່ອນແລ້ວເຮັດບໍ່ດີ
ການທີ່ບັນດິດໂກດບໍ່ດີ

[໘໙໐] ຂ້າແດ່ ພຣະອົງຜູ້ເປັນເຈົ້າແຫ່ງທິດ
ກະສັດຊົງພິຈາຣະນາກ່ອນແລ້ວຈຶ່ງຄວນເຮັດ
ບໍ່ຊົງພິຈາຣະນາກ່ອນແລ້ວບໍ່ຄວນຕັດສິນ
ຍົດແລະກຽດຍ່ອມຈະເລີນແດ່ພຣະຣາຊາຜູ້ຊົງພິຈາຣະນາກ່ອນແລ້ວຈຶ່ງເຮັດ

[໘໙໑] ຂໍເດຊະພຣະພູມິບານ
ຄົນຜູ້ເປັນໃຫຍ່ຄວນພິຈາຣະນາກ່ອນແລ້ວຈຶ່ງລົງອາດຍາ
ວຽກງານທີ່ເຮັດຍ້ອນຄວາມຮີບຮ້ອນຍ່ອມເດືອດຮ້ອນ
ສ່ວນປະໂຫຍດທັງຫຼາຍຂອງນໍຣະຊົນທີ່ເຮັດດ້ວຍຈິດທີ່ຕັ້ງໝັ້ນໂດຍຊອບ
ຍ່ອມບໍ່ເປັນເຫດໃຫ້ເດືອດຮ້ອນໃນພາຍຫຼັງ

[໔໓໔] ອັນໜຶ່ງ ຊົນເຫຼົ່າໃດຈັດແຈງບໍ່ເກີດແຫ່ງວຽກງານໃນໂລກ
ແລ້ວເຮັດວຽກງານທີ່ບໍ່ເປັນເຫດໃຫ້ເດືອດຮ້ອນໃນພາຍຫຼັງ
ວຽກງານຂອງພວກເຂົາວິນຍູຊົນສັນເສີນ
ມີຄວາມສຸກເປັນກຳໄລທີ່ຜູ້ຮູ້ທັງຫຼາຍມີຄວາມເຫັນດີນຳ

[໔໓໑] ຂໍເດຊະພຣະອົງຜູ້ຈອມຊົນ ພະນັກງານເຝົ້າປະຕູທີ່ຕິດດາບ
ແລະເພດຊະຄາດມາເພື່ອຈະຂ້າຂ້ານ້ອຍ
ອັນໜຶ່ງ ຂ້ານ້ອຍນັ່ງຢູ່ເທິງພຣະເພົາຂອງພຣະຣາດຊະມານດາ
ຖືກພວກເຂົາດຶງລາກມາໂດຍທາຣຸນ

[໔໓໔] ຂໍເດຊະພຣະມະຫາຣາດ ຂ້ານ້ອຍປະສົບໄພຄືຄວາມຕາຍ
ອັນເຜັດຮ້ອນຄັບແຄບແລະລຳບາກ
ວັນນີ້ຊີວິດອັນເປັນທີ່ຮັກປານດັ່ງມະທຸຣົດຂ້ານ້ອຍໄດ້ແລ້ວ
ພົ້ນແລ້ວຈາກການຖືກປະຫານໄດ້ໂດຍຍາກ
ຈຶ່ງມີໃຈມຸ້ງຕໍ່ການບວດຢ່າງດຽວ

(ພຣະຣາຊາຊົງຮັບສັ່ງຮຽກພຣະຣາດຊະເທວີມາຕັດວ່າ)

[໔໓໕] ແມ່ສຸທຳມາ ໂສມະນັດກຸມານະບຸດຂອງທ່ານນີ້ຍັງໜຸ່ມຢູ່ ໜ້າອີດູ
ວັນນີ້ເຮົາຂໍຮ້ອງເຂົາບໍ່ສຳເລັດ ແມ່ນທ່ານກໍຄວນຈະຂໍຮ້ອງເຂົາເບິ່ງແດ່

(ພຣະຣາດຊະເທວີນັ້ນເມື່ອຈະສົ່ງເສີມໃຫ້ບວດຈຶ່ງຕັດວ່າ)

[໔໓໖] ລູກຮັກ ເຈົ້າຈົ່ງຍິນດີໃນພິກຂາຈານ
ຈົ່ງພິຈາຣະນາແລ້ວບວດໃນທຳທັງຫຼາຍ
ຈົ່ງ ວາງອາດຍາໃນເຫຼົ່າສັດທັງປວງ
ເປັນຜູ້ບໍ່ຖືກນິນທາ ເຂົ້າເຖິງພົມສະຖານເທີ້ນ

(ລຳດັບນັ້ນ ພຣະຣາຊາຕັດວ່າ)

[໔໓໗] ແມ່ສຸທຳມາ ຄຳທີ່ເຈົ້າກ່າວໜ້າອັດສະຈັນຈິງນໍ
ເຮັດເຮົາຜູ້ມີທຸກຢູ່ແລ້ວໃຫ້ມີທຸກຍິ່ງຂຶ້ນ
ເຮົາກ່າວແກ່ເຈົ້າວ່າ ເຈົ້າຈົ່ງຂໍຮ້ອງລູກ
ກັບເຮັດໃຫ້ກຸມານມີອຸດສາຫະຍິ່ງຂຶ້ນ

(ພຣະຣາດຊະເທວີຕັດຕໍ່ໄປວ່າ)

[໔໓໘] ພຣະອະຣິຍະເຫຼົ່າໃດຜູ້ຫຼຸດພົ້ນແລ້ວ
ບໍຣິໂພກປັດໄຈອັນຫາໂທດບໍ່ໄດ້
ຜູ້ດັບກິເລດແລ້ວ ທ່ອງທ່ຽວໄປຢູ່ໃນໂລກນີ້
ຂ້ານ້ອຍບໍ່ອາດຈະຫ້າມລູກກຸມານ
ຜູ້ດຳເນີນໄປສູ່ທາງແຫ່ງພຣະອະຣິຍະເຫຼົ່ານັ້ນໄດ້

(ພຣະຣາຊາຊົງສະດັບພຣະຣາດຊະເສາວະນີນັ້ນແລ້ວຈຶ່ງຕັດວ່າ)

[໔໓໙] ຊົນເຫຼົ່າໃດມີປັນຍາ ເປັນພະຫູສູດ
ຄິດເຫດການໄດ້ເປັນຈຳນວນຫຼາຍ
ພຣະນາງສຸທຳມານີ້ສະດັບຄຳອັນເປັນສຸພາສິດຂອງຊົນເຫຼົ່າໃດ
ແລ້ວເປັນຜູ້ມີຄວາມຂວນຂວາຍໜ້ອຍ
ປາສະຈາກຄວາມເສົ້າໂສກ
ຊົນເຫຼົ່ານັ້ນເຮົາຄວນຄົບໂດຍແທ້

**ໂສມະນັດສະຊາດົກທີ ໙ ຈົບ**

## ໑໐. ຈຳເປີຍຍະຊາດົກ (໕໐໖)
## ວ່າດ້ວຍພະຍານາກຈຳເປີຍຍະ

(ພຣະຣາຊາຊົງເຫັນນາງນາກສຸມະນາຢູ່ໃນອາກາດ ຈຶ່ງຕັດວ່າ)

[໔໔໐] ທ່ານເປັນໃຜກັນນໍ ຣັດສະໝີຊ່າງງາມຜ່ອງໃສດັ່ງສາຍຟ້າ
ອຸປະມາເໝືອນດາວປະກາຍພຶກ ຂ້າພະເຈົ້າບໍ່ເຂົ້າໃຈນາງວ່າ
ເປັນເທບທິດາ ຍິງຄົນທັບ ຫຼືຍິງມະນຸດນໍ

(ນາງນາກສຸມະນາໄດ້ຟັງດັ່ງນັ້ນແລ້ວ ຈຶ່ງຕັດຕອບວ່າ)

[໔໔໑] ຂໍເດຊະພຣະມະຫາຣາດ ຂ້ານ້ອຍບໍ່ແມ່ນເທບທິດາ
ບໍ່ແມ່ນຍິງຄົນທັບ ບໍ່ແມ່ນຍິງມະນຸດ
ຂ້ານ້ອຍເປັນນາງນາກກັນຍາ ມາບ່ອນນີ້ຍ້ອນເຫດຢ່າງໜຶ່ງ

(ພຣະຣາຊາຕັດຖາມວ່າ)

[໔໔໔]　ທ່ານມີຈິດກະວົນກະວາຍ ອິນຊີເສົ້າໝອງ
　　ມີຢາດນ້ຳຕາໄຫຼນອງໜ້າ ແມ່ນາງ ເຊີນບອກມາເທີ້ນ
　　ອັນໃດຂອງທ່ານຫາຍ ຫຼືທ່ານປາຖະໜາສິ່ງໃດ ຈຶ່ງມາທີ່ນີ້

(ນາງນາກສຸມະນາຕອບວ່າ)

[໔໔໓]　ກໍຊາວໂລກຮ້ອງຮຽກສັດໃດວ່າ ອຸຣະຄະຊາດ ຜູ້ມີເດດຍິ່ງໃຫຍ່
　　ຂໍເດຊະ ພຣະອົງຜູ້ຈອມຊົນ ຊົນທັງຫຼາຍຮຽກສັດນັ້ນວ່ານາກ
　　ຊາຍຜູ້ຕ້ອງການລ້ຽງຊີບໄດ້ຈັບນາກນັ້ນມາ
　　ນາກນັ້ນເປັນສາມີຂ້ານ້ອຍ
　　ຂໍພຣະອົງໂຜດຊົງປ່ອຍນາກນັ້ນຈາກເຄື່ອງຜູກເທີ້ນ

(ພຣະຣາຊາຕັດຖາມວ່າ)

[໔໔໔]　ນາຄະຣາດນີ້ປະກອບດ້ວຍກຳລັງແລະຄວາມພຽນ
　　ກັບມາຕົກຢູ່ໃນເງື້ອມມືຂອງຄົນວະນິພົກໄດ້ແນວໃດ
　　ແມ່ນາງນາກກັນຍາ ຂໍແມ່ນາງຈົ່ງບອກເນື້ອຄວາມນັ້ນແກ່ເຮົາ
　　ເຮົາຈະຮູ້ວ່າ ນາຄະຣາດຖືກຈັບມາໄດ້ແນວໃດ

(ນາງນາກສຸມະນາຕອບວ່າ)

[໔໔໕]　ແທ້ຈິງ ນາຄະຣາດນັ້ນປະກອບດ້ວຍກຳລັງແລະຄວາມພຽນ
　　ເພິ່ງທຳແມ່ນພຣະນະຄອນໃຫ້ເປັນເຖົ້າທຸລີໄດ້
　　ແຕ່ເພາະນາຄະຣາດເປັນຜູ້ນົບນອບພຣະທຳ
　　ສະນັ້ນ ຈຶ່ງບາກບັ່ນພ່ຳເພັງຕະບະ

[໔໔໖]　ຂໍເດຊະພຣະມະຫາຣາດ ນາຄະຣາດອະທິຖານຈາຕຸດທະສີອຸໂປສົດ
　　ແລະປັນນະຣະສີອຸໂປສົດ ນອນຮັກສາອຸໂປສົດຢູ່ໃກ້ທົນທາງສີ່ແຍກ
　　ຊາຍຜູ້ຕ້ອງການລ້ຽງຊີບໄດ້ຈັບນາຄະຣາດນັ້ນມາ
　　ນາຄະຣາດນັ້ນເປັນສາມີຂ້ານ້ອຍ
　　ຂໍພຣະອົງໂຜດປ່ອຍນາຄະຣາດນັ້ນ
　　ຈາກເຄື່ອງພັນທະນາການດ້ວຍເທີ້ນ ຂ້ານ້ອຍ

(ແລະນາງອ້ອນວອນພຣະຣາຊານັ້ນຊ້ຳແລ້ວຊ້ຳອີກວ່າ)

[໘໔໗] ນາງນາກ ໑໖,໐໐໐ ນາງສວມໃສ່ກຸນທົນແກ້ວມະນີ
ນອນຢູ່ໃນຫ້ອງໃຕ້ນ້ຳ
ນາງນາກແມ່ນເຫຼົ່ານັ້ນຢຶດເອົານາຄະຣາດນັ້ນເປັນບ່ອນເພິ່ງ

[໘໔໘] ຂໍພຣະອົງໂຜດປ່ອຍນາຄະຣາດໄປໂດຍທຳ
ດ້ວຍຄວາມບໍ່ຮີບຟ້າວ
ດ້ວຍບ້ານສ່ວຍ ໑໐໐ ຫຼັງ
ຄຳ ໑໐໐ ແທ່ງ ແລະ ງົວ ໑໐໐ ຕົວ
ຂໍອຸຣະຄະຊາດຜູ້ໄດ້ຮັບການປ່ອຍຕົວແລ້ວຈົ່ງທ່ອງທ່ຽວໄປ
ຂໍນາຄະຣາດຜູ້ຕ້ອງການບຸນຈົ່ງພົ້ນຈາກເຄື່ອງຜູກ

(ພຣະຣາຊາຕັດວ່າ)

[໘໔໙] ເຮົາຈະປ່ອຍນາຄະຣາດໄປໂດຍທຳ
ດ້ວຍຄວາມບໍ່ຮີບຟ້າວ ດ້ວຍບ້ານສ່ວຍ ໑໐໐ ຫຼັງ
ຄຳ ໑໐໐ ແທ່ງ ແລະງົວ ໑໐໐ ຕົວ
ຂໍອຸຣະຄະຊາດຜູ້ໄດ້ຮັບການປ່ອຍຕົວແລ້ວຈົ່ງທ່ອງທ່ຽວໄປ
ຂໍນາຄະຣາດຜູ້ຕ້ອງການບຸນຈົ່ງພົ້ນຈາກເຄື່ອງຜູກ

[໘໕໐] ພໍ່ພານ ເຮົາຈະໃຫ້ຄຳແກ່ທ່ານ ໑໐໐ ແທ່ງ
ຕຸ້ມຫູແກ້ວມະນີມີຄ່າຫຼາຍ ແລະບັນລັງ ໔ ຫຼ່ຽມ
ມີສີອັນເປັນສີຣິຄ້າຍດອກຜັກຕົບ

[໘໕໑] ພັນລະຍາທີ່ເໝາະສົມກັນ ໒ ຄົນ ແລະງົວອຸສະພະອີກ ໑໐໐ ຕົວ
ຂໍອຸຣະຄະຊາດຜູ້ໄດ້ຮັບການປ່ອຍຕົວແລ້ວຈົ່ງທ່ອງທ່ຽວໄປ
ຂໍນາຄະຣາດຜູ້ຕ້ອງການບຸນຈົ່ງພົ້ນຈາກເຄື່ອງຜູກ

(ນາຍພານຂາບທູນພຣະຣາຊາວ່າ)

[໘໕໒] ຂໍເດຊະພຣະອົງຜູ້ຈອມຊົນ ແມ່ນຈະຊົງເວັ້ນການພຣະຣາດຊະທານ
ພຽງພຣະດຳຣັດຂອງພຣະອົງທີ່ນັ້ນ
ຂ້າພຣະອົງກໍຈະປ່ອຍອຸຣະຄະຊາດນັ້ນຈາກເຄື່ອງຜູກ
ຂໍອຸຣະຄະຊາດຜູ້ໄດ້ຮັບການປ່ອຍຕົວແລ້ວຈົ່ງທ່ອງທ່ຽວໄປ
ຂໍນາຄະຣາດຜູ້ຕ້ອງການບຸນຈົ່ງພົ້ນຈາກເຄື່ອງຜູກ

(ພຣະສາດສະດາຊົງປະກາດຄວາມນັ້ນວ່າ)

[໘໕໓] ພະຍານາກຈຳເປີຍຍະຫຼຸດພົ້ນຈາກເຄື່ອງພັນທະນາການແລ້ວ
ໄດ້ຂາບທູນພຣະຣາຊານັ້ນວ່າ ຂໍເດຊະພຣະເຈົ້າກາສີ
ຂ້າພຣະອົງຂໍຖວາຍບັງຄົມພຣະອົງ
ຂໍເດຊະ ພຣະອົງຜູ້ຜະດຸງແຄວັ້ນກາສີໃຫ້ຈະເລີນ
ຂ້າພຣະອົງຂໍຖວາຍບັງຄົມພຣະອົງ
ຂໍປະຄອງອັນຊະລີຕໍ່ພຣະອົງ
ຂໍເຊີນສະເດັດທອດພຣະເນດນິເວດຂອງຂ້າພຣະອົງ

(ພຣະຣາຊາຕັດວ່າ)

[໘໕໔] ນາຄະຣາດ ຢ່າງແນ່ນອນທີ່ເຂົາເວົ້າກັນວ່າ
ມະນຸດກັບອະມະນຸດຈະເພິ່ງຄຸ້ນເຄີຍກັນ
ເປັນເລື້ອງຄຸ້ນເຄີຍກັນໄດ້ຍາກ
ແຕ່ຖ້າທ່ານຂໍຮ້ອງເຮົາກ່ຽວກັບເລື້ອງນັ້ນ
ເຮົາກໍຈະໄປຢ້ຽມບ່ອນຢູ່ຂອງທ່ານ

(ຄັ້ງນັ້ນ ພຣະໂພທິສັດເມື່ອຈະປະຕິນຍາໃຫ້ພຣະຣາຊາຊົງເຊື່ອ ຈຶ່ງຂາບທູນວ່າ)

[໘໕໕] ຂໍເດຊະພຣະມະຫາຣາດ ເຖິງລົມຈະພັດພາເອົາພູເຂົາໄປໄດ້ກໍດີ
ດວງຈັນແລະດວງອາທິດຈະເພິ່ງແຜດເຜົາແຜ່ນດິນກໍດີ
ແມ່ນ້ຳທຸກສາຍຈະເພິ່ງໄຫຼທວນກະແສກໍດີ
ເຖິງຢ່າງນັ້ນ ຂ້າພຣະອົງກໍຈະບໍ່ເພິ່ງເວົ້າຕົວະແນ່ນອນ

[໘໕໖] ຂໍເດຊະພຣະມະຫາຣາດ ເຖິງທ້ອງຟ້າຈະເພິ່ງຖະຫຼົ່ມທະລາຍ
ນ້ຳທະເລຈະເພິ່ງເຫືອດແຫ້ງ
ແຜ່ນດິນເຊິ່ງມີນາມວ່າພູຕະທາຣາແລະວະສຸນທະຣາຈະເພິ່ງມ້ວນເຂົ້າ
ແລະພູເຂົາສິເນຣຸສີລາລ້ວນຈະເພິ່ງຖອນຂຶ້ນທັງຮາກກໍດີ
ເຖິງຢ່າງນັ້ນ ຂ້າພຣະອົງກໍຈະບໍ່ເພິ່ງເວົ້າຕົວະ

(ພຣະຣາຊາບໍ່ຊົງເຊື່ອຈຶ່ງຕັດຊ້ຳອີກວ່າ)

[໘໕໗] ນາຄະຣາດ ຢ່າງແນ່ນອນທີ່ເຂົາເວົ້າກັນວ່າ
ມະນຸດກັບອະມະນຸດຈະເພິ່ງຄຸ້ນເຄີຍກັນ

ເປັນເລື້ອງຄຸ້ນເຄີຍກັນໄດ້ຍາກ
ແຕ່ຖ້າທ່ານຂໍຮ້ອງເຮົາກ່ຽວກັບເລື້ອງນັ້ນ
ເຮົາກໍຈະໄປຢ້ຽມບ່ອນຢູ່ຂອງທ່ານ

(ແລະຕັດຄາຖາຕໍ່ໄປວ່າ)

[໘໕໗] ພວກທ່ານເປັນຜູ້ມີພິດຮ້າຍແຮງ
ມີເດດຫຼາຍ ແລະກໍໂກດງ່າຍ
ທ່ານຫຼຸດພົ້ນຈາກເຄື່ອງຜູກເພາະເຮົາ
ຄວນຈະຮູ້ຄຸນທີ່ເຮົາເຮັດແລ້ວ

(ພຣະໂພທິສັດເມື່ອຈະເຮັດປະຕິນຍາອີກ ຈຶ່ງຂາບທູນວ່າ)

[໘໕໙] ຜູ້ໃດຖືກຂັງຕິດຢູ່ໃນຄຸກໃກ້ຈະຕາຍ
ຍັງບໍ່ຮູ້ຈັກບຸນຄຸນທີ່ພຣະອົງຊົງເຮັດແລ້ວເຊັ່ນນັ້ນ
ຂໍຜູ້ນັ້ນຈົ່ງມີກາໄໝ້ຢູ່ໃນນະຮົກທີ່ໂຫດຮ້າຍ
ຢ່າໄດ້ຄວາມສຳຮານທາງກາຍແນວໃດແນວໜຶ່ງເລີຍ

(ພຣະຣາຊາຊົງຊົມເຊີຍພຣະໂພທິສັດນັ້ນວ່າ)

[໘໖໐] ຂໍປະຕິນຍາຂອງທ່ານຈົ່ງເປັນສັດຈິງເທີ້ນ
ຂໍທ່ານຢ່າເປັນຜູ້ມີນິໄສມັກໂກດແລະຜູກໂກດ
ຂໍຄຸດທັງຫຼາຍຈົ່ງງົດເວັ້ນຕະກູນນາກຂອງທ່ານທັງມວນ
ເໝືອນບຸກຄົນງົດເວັ້ນໄຟໃນຄິມຫັນຕະລະດູ

(ຝ່າຍພຣະໂພທິສັດກໍໄດ້ຊົມເຊີຍພຣະຣາຊາວ່າ)

[໘໖໑] ຂໍເດຊະພຣະອົງຜູ້ຈອມຊົນ
ພຣະອົງຊົງອະນຸເຄາະຕະກູນນາກ
ເໝືອນມານດາອະນຸເຄາະບຸດສຸດທີ່ຮັກຄົນດຽວ
ຂ້າພຣະອົງພ້ອມກັບຕະກູນນາກ
ຈະທຳການຂວນຂວາຍຕອບແທນພຣະອົງຢ່າງຍິ່ງໃຫຍ່

(ພຣະຣາຊາຊົງມີພຣະປະສົງຈະສະເດັດໄປສູ່ພິບນາກ ຈຶ່ງຮັບສັ່ງວ່າ)

[໘໖໘] ເຈົ້າພະນັກງານທັງຫຼາຍຈົ່ງທຽມຣາດຊະລົດທີ່ງາມວິຈິດ

ຈຶ່ງທຽມມ້າອັດສະດອນທີ່ເຝິກດີແລ້ວ ເຊິ່ງເກີດໃນແຄວັ້ນກຳໂພຊະ
ອັນໜຶ່ງ ຈຶ່ງຜູກຊ້າງຕົວປະເສີດ
ເຊິ່ງປະດັບດ້ວຍສຸວັນນະວັດຖາພອນ
ເຮົາຈະໄປຢາມນິເວດຂອງນາຄະຣາດ

(ພຣະສາດສະດາຕັດພຣະຄາຖາວ່າ)

[໘໖໓] ເຈົ້າພະນັກງານຕີກອງຕະໂພນ ແກວ່ງບັນເດາະ ເປົ່າຫອຍສັງ
ຕໍ່ພຣະເຈົ້າອຸກຄະເສນ ພຣະຣາຊາມີໝູ່ນາຣີແວດລ້ອມ
ສະເດັດໄປທ່າມກາງໝູ່ນາຣີງົດງາມ

(ພຣະສາດສະດາເມື່ອຈະຊົງປະກາດເລື້ອງນັ້ນ ຈຶ່ງຕັດວ່າ)

[໘໖໔] ພຣະຣາຊາຜູ້ຜະດຸງແຄວັ້ນກາສີໃຫ້ຈະເລີນ
ໄດ້ທອດພຣະເນດພູມີພາກທີ່ວິຈິດດ້ວຍຊາຍຄຳ
ແລະຜາສາດຄຳ ເຊິ່ງປູດ້ວຍແຜ່ນແປ້ນແກ້ວໄພທູນ

[໘໖໕] ພຣະຣາຊາພຣະອົງນັ້ນສະເດັດເຂົ້າໄປສູ່ນິເວດຂອງພະຍານາກຈຳເປີຍຍະ
ເຊິ່ງປະດັບຕົບແຕ່ງໄວ້ແລ້ວ ອັນມີຣັດສະໝີໂອພາດເປ່ງປັ່ງ
ຄືດັ່ງແສງອາທິດທຳອິດອຸໄທ ແລະຄືດັ່ງສາຍຟ້າໃນກຸ່ມເມກ

[໘໖໖] ພຣະເຈົ້າກາສີພຣະອົງນັ້ນ
ສະເດັດທອດພຣະເນດຈົນທົ່ວພຣະນິເວດຂອງພະຍານາກຈຳເປີຍຍະ
ທີ່ເດຍລະດາດດ້ວຍພຶກສາຊາດນານາພັນ
ເຊິ່ງອົບອວນດ້ວຍກິ່ນຫອມນານາປະການ

[໘໖໗] ເມື່ອພຣະເຈົ້າກາສີສະເດັດໄປສູ່ນິເວດຂອງພະຍານາກຈຳເປີຍຍະ
ເຫຼົ່າທິບດົນຕີກໍບັນເລງ ທັງເຫຼົ່ານາງນາກກັນຍາກໍຟ້ອນລຳ

[໘໖໘] ພຣະເຈົ້າກາສີສະເດັດຂຶ້ນສູ່ນາກນິເວດ
ເຊິ່ງມີໝູ່ນາງນາກກັນຍາຕາມສະເດັດ
ຊົງພໍພຣະຫະໄທ ປະທັບນັ່ງເທິງພັດທະຣະບິດຄຳ
ມີພະນັກອີງສາບໄລ້ດ້ວຍຈຸນແກ່ນຈັນຫອມເຊິ່ງເປັນທິບ

[໘໖໙] ພຣະອົງສະເຫວີຍແລະຊົງຣື່ນຣົມຢູ່ໃນນາຄະໂລກນັ້ນແລ້ວ

ໄດ້ຕັດກັບພະຍານາກຈຳເປັຍຍະວ່າ ທ່ານມີວິມານອັນປະເສີດເຫຼົ່ານີ້
ເຊິ່ງຣັດສະໝີເປ່ງປັ່ງດັ່ງຣັດສະໝີດວງອາທິດ ວິມານເຊັ່ນນີ້ໃນມະນຸດໂລກບໍ່ມີ
ນາຄະຣາດ ເພື່ອປະສົງອັນໃດອີກ ທ່ານຈຶ່ງຍັງພໍ່າເພັງຕະບະຢູ່

[໔໗໐] ນາງນາກກັນຍາເຫຼົ່ານັ້ນສວມສັງວານຄຳ
ໃສ່ເສື້ອຜ້າສວຍງາມ ມີອົງຄຸລີກົມສ້ວຍ ມີຝາມືຝາຕີນແດງ
ຜິວພັນບໍ່ຊາມເລີຍ ຖ້າປະຄອງໃຫ້ທ່ານດື່ມນ້ຳທິບ
ຄວາມງາມເຊັ່ນນີ້ໃນມະນຸດໂລກບໍ່ມີ
ນາຄະຣາດ ເພື່ອປະສົງອັນໃດ ທ່ານຈຶ່ງຍັງພໍ່າເພັງຕະບະຢູ່

[໔໗໑] ອັນໜຶ່ງ ໃນໂລກຂອງທ່ານ ແມ່ນ້ຳເຫຼົ່ານີ້
ດາດດື່ນດ້ວຍຝູງປາມີເກັດໜານານາຊະນິດ
ມີນົກເງືອກເປ່ງສຳນຽງສຽງຮ້ອງຢູ່ຣະງົມໄພ ມີທ່ານ້ຳທີ່ສວຍງາມ
ສະຖານທີ່ເປັນທິບເຊັ່ນນີ້ໃນມະນຸດໂລກບໍ່ມີ
ນາຄະຣາດ ເພື່ອປະສົງອັນໃດອີກ ທ່ານຈຶ່ງຍັງພໍ່າເພັງຕະບະຢູ່

[໔໗໔] ຝູງນົກກະຣຽນ ນົກຍູງ ຫົງ ແລະນົກກາເວົາທິບ
ຕ່າງພາກັນເປ່ງສຳນຽງປະສານສຽງຢ່າງມ່ວນ ໂຜຜິນໄປມາ
ປັກສາທິບເຊັ່ນນີ້ໃນມະນຸດໂລກບໍ່ມີ
ນາຄະຣາດ ເພື່ອປະສົງອັນໃດ ທ່ານຈຶ່ງຍັງພໍ່າເພັງຕະບະຢູ່

[໔໗໓] ຕົ້ນໝາກມ່ວງ ຕົ້ນສາລະ ຕົ້ນໝາກເມົ່າ ຕົ້ນຫວ້າ
ຕົ້ນດອກຄູນ ແລະຕົ້ນແຄຝອຍ ແຕກດອກອອກຜົນບານສະພັ່ງ
ຣຸກຂະຊາດອັນເປັນທິບເຊັ່ນນີ້ໃນມະນຸດໂລກບໍ່ມີ
ນາຄະຣາດ ເພື່ອປະສົງອັນໃດ ທ່ານຈຶ່ງຍັງພໍ່າເພັງຕະບະຢູ່

[໔໗໔] ອັນໜຶ່ງ ຮອບ ໆ ສະໂບກຂະຣະນີຂອງທ່ານ
ທິບພະສຸຄົນເຫຼົ່ານີ້ຫອມຟຸ້ງຕະຫຼົບອົບອວນ ບໍ່ຂາດສາຍ
ທິບພະສຸຄົນເຊັ່ນນີ້ໃນມະນຸດໂລກບໍ່ມີ
ນາຄະຣາດ ເພື່ອປະສົງອັນໃດ ທ່ານຈຶ່ງຍັງພໍ່າເພັງຕະບະຢູ່

(ນາຄະຣາດຂາບທູນວ່າ)

[໔໗໕] ຂໍເດຊະພຣະອົງຜູ້ຈອມຊົນ ຂ້າພຣະອົງພໍ່າເພັງຕະບະ

ຍ້ອນເຫດແຫ່ງບຸດ ຍ້ອນເຫດແຫ່ງຊັບສົມບັດ
ຫຼືແມ່ນຍ້ອນເຫດແຫ່ງອາຍຸກໍຫາບໍ່ໄດ້
ແຕ່ເພາະຂ້າພຣະອົງປາຖະໜາກຳເນີດແຫ່ງມະນຸດ
ຍ້ອນເຫດນັ້ນ ຈຶ່ງບາກບັ່ນພ່ຳເພັງຕະບະຢູ່

(ພຣະຣາຊາຊົງຊົມເຊີຍພຣະໂພທິສັດວ່າ)

[໔໗໖] ທ່ານມີດວງເນດແດງ ມີຣັດສະໝີເປ່ງປັ່ງ
ປະດັບຕົບແຕ່ງຢ່າງສວຍງາມ
ຕັດເຄົາແຖໜວດຮຽບຮ້ອຍ
ຊະໂລມລູບໄລ້ດ້ວຍຈຸນແກ່ນຈັນແດງ
ເປ່ງຣັດສະໝີໄປທົ່ວທິດ ດັ່ງຣາຊາແຫ່ງຄົນທັນ

[໔໗໗] ທ່ານເຖິງພ້ອມດ້ວຍເທບລິດ ມີອານຸພາບຍິ່ງໃຫຍ່
ພຽບພ້ອມດ້ວຍການທັງໝົດ
ນາຄະຣາດ ເຮົາຂໍຖາມເນື້ອຄວາມນັ້ນກັບທ່ານ
ມະນຸດໂລກມີອັນໃດປະເສີດກວ່ານາຄະໂລກນີ້ບໍ

(ນາຄະຣາດຂາບທູນວ່າ)

[໔໗໘] ຂໍເດຊະພຣະອົງຜູ້ຈອມຊົນ ນອກຈາກມະນຸດໂລກແລ້ວ
ຄວາມບໍລິສຸດຫຼືຄວາມສັງລວມຍ່ອມບໍ່ມີ
ຂ້າພຣະອົງໄດ້ກຳເນີດມະນຸດແລ້ວ
ຈະເຮັດທີ່ສຸດແຫ່ງການເກີດແລະການຕາຍ

(ພຣະຣາຊາຕັດວ່າ)

[໔໗໙] ຊົນເຫຼົ່າໃດມີປັນຍາ ເປັນພະຫູສູດ
ຄິດເຫດການໄດ້ເປັນຈຳນວນຫຼາຍ
ຊົນເຫຼົ່ານັ້ນຄວນຄົບໂດຍແທ້
ຂ້າພະເຈົ້າເຫັນນາງນາກກັນຍາແລະຕົວທ່ານແລ້ວ
ຈະທຳບຸນໃຫ້ຫຼາຍ ເດີ້ນາຄະຣາດ

(ນາຄະຣາດຂາບທູນວ່າ)

[໔໗໐] ຊົນເຫຼົ່າໃດມີປັນຍາ ເປັນພະຫູສູດ
ຄິດເຫດການໄດ້ເປັນຈຳນວນຫຼາຍ
ຊົນເຫຼົ່ານັ້ນຄວນຄົບໂດຍແທ້
ຂໍເດຊະພຣະມະຫາຣາດ ພຣະອົງເຫັນນາງນາກກັນຍາ
ແລະຂ້າພຣະອົງແລ້ວ
ໂຜດຊົງທຳບຸນໃຫ້ຫຼາຍເທີ້ນ

(ພຣະໂພທິສັດເມື່ອຈະສະແດງຊັບຈຶ່ງຂາບທູນວ່າ)

[໔໗໑] ກໍເງິນຄຳຂອງຂ້າພຣະອົງນີ້ມີຢູ່ພຽງພໍ
ກອງຄຳສູງປະມານຊົ່ວລຳຕານ
ພຣະອົງໂຜດໃຫ້ຂົນໄປຈາກບ່ອນນີ້ແລ້ວຈຶ່ງໃຫ້ສ້າງພຣະຕຳໜັກຄຳ
ແລະສ້າງກຳແພງເງິນເທີ້ນ

[໔໗໔] ອັນໜຶ່ງ ແກ້ວມຸກດາປະມານ ໕,໐໐໐ ເຫຼັ້ມກວຽນ
ທີ່ປົນກັບແກ້ວໄພທູນ
ພຣະອົງໂຜດໃຫ້ຂົນໄປຈາກບ່ອນນີ້ແລ້ວ
ຈຶ່ງປູລາດລົງເທິງພາກພື້ນດິນໃນບຸຣີ
ເມື່ອເປັນເຊັ່ນນີ້ ພື້ນດິນຈັກບໍ່ເປັນຕົມ
ແລະຈະບໍ່ມີຝຸ່ນລະອອງ

[໔໗໓] ຂໍເດຊະພຣະມະຫາຣາດຜູ້ປະເສີດ ຊົງມີພຣະປີຊາອັນລ້ຳເລີດ
ຂໍພຣະອົງໂຜດສະເຫວີຍຣາດຊະສົມບັດ
ຄອບຄອງເມືອງພາຣານະສີເຊິ່ງມັ່ງຄັ່ງສົມບູນ
ສະງ່າງາມລ້ຳເລີດດັ່ງທິບພະວິມານເຫັນປານນີ້ເທີ້ນ

**ຈຳເປີຍຍະຊາດົກທີ 10 ຈົບ**

## ໑໑. ມະຫາປະໂລພະນະຊາດົກ (໕໐໗)
## ວ່າດ້ວຍການປະເລົ້າປະໂລມໃຫ້ຍິງ

(ພຣະສາດສະດາຊົງນຳອະດີດນິທານມາຕັດວ່າ)

[໔໗໔] ເທບພະບຸດຜູ້ມີລິດຫຼາຍ ຈຸຕິຈາກພົມມະໂລກ

ບັງເກີດເປັນພຣະໂອຣົດຂອງພຣະຣາຊາຜູ້ດຳຣົງຢູ່ໃນຣາດຊະສົມບັດ
ເຊິ່ງໃຫ້ສຳເລັດຄວາມປາຖະໜາທຸກປະການ

[໔໗໕] ການກໍດີ ຄວາມສຳຄັນໃນການກໍດີ ບໍ່ມີໃນພົມມະໂລກ
ພຣະກຸມານນັ້ນຊົງຮັງກຽດການທັງຫຼາຍ
ເພາະສັນຍານັ້ນນັ້ນເອງ

[໔໗໖] ກໍພາຍໃນເມືອງ ໄດ້ມີເຮືອນສຳລັບພໍ່າເພັງຊານ
ທີ່ພຣະຣາດຊະບິດາໂຜດໃຫ້ສ້າງໄວ້ຢ່າງດີເພື່ອພຣະກຸມານນັ້ນ
ພຣະກຸມານຊົງຫຼົບຫຼີກພໍ່າເພັງຊານຢູ່ພຣະອົງດຽວ
ໃນບ່ອນລັບໃນເຮືອນສຳລັບພໍ່າເພັງຊານນັ້ນ

[໔໗໗] ພຣະຣາຊາພຣະອົງນັ້ນຊົງອັດອັ້ນຕັນພຣະຫະໄທ
ດ້ວຍຄວາມໂສກຍ້ອນພຣະໂອຣົດ ໄດ້ຊົງຈົ່ມເພີ້ລຳພັນວ່າ
ກໍໂອຣົດອົງດຽວຂອງເຮົານີ້ບໍ່ຍອມບໍຣິໂພກການອັນໃດເລີຍ

(ພຣະຣາຊາຊົງຈົ່ມເພີ້ລຳພັນວ່າ)

[໔໗໘] ຜູ້ໃດສາມາດເວົ້າໂອ້ລົມໃຫ້ໂອຣົດຂອງເຮົາ
ຫັນກັບມາປາຖະໜາການໄດ້ອີກ
ຫຼືວ່າມີອຸບາຍຂໍ້ໃດທີ່ຈະເຮັດໃຫ້
ໂອຣົດຂອງເຮົານັ້ນກັບມາກ່ຽວຂ້ອງກັບການໄດ້ອີກ

(ພຣະສາດສະດາຕັດເລົ່າເລື່ອງວ່າ)

[໔໗໙] ພາຍໃນເມືອງນັ້ນເອງ ໄດ້ມີກຸມາຣີໄວລຸ້ນນາງໜຶ່ງ
ມີຜິວພັນຮູບຮ່າງງົດງາມ
ເປັນຍິງສະຫຼາດໃນການຟ້ອນລຳຂັບຮ້ອງ
ແລະໄດ້ຮັບການເຝິກຝົນເປັນຢ່າງດີໃນການບັນເລງດົນຕີ

[໔໘໐] ນາງໄດ້ເຂົ້າໄປພາຍໃນພຣະຣາດຊະຖານ
ໄດ້ຂາບທູນພຣະຣາຊາດັ່ງນີ້ວ່າ
ຖ້າຂ້ານ້ອຍຈັກໄດ້ພຣະກຸມານເປັນພັດສະດາ
ຂ້ານ້ອຍກໍຈະປະເລົ້າປະໂລມພຣະກຸມານນັ້ນ

[໔໙໑] ພຣະຣາຊາໄດ້ຕັດກັບນາງຜູ້ຂາບທູນຢ່າງນັ້ນດັ່ງນີ້ວ່າ
ທ່ານປະເລົ້າປະໂລມເຂົາໄດ້ ທ່ານຈັກໄດ້ເຂົາເປັນພັດສະດາ

(ພຣະສາດສະດາຊົງປະກາດຄວາມຂໍ້ນັ້ນວ່າ)

[໔໙໔] ກໍນາງເມື່ອໄປເຖິງພາຍໃນພຣະຣາດຊະຖານ
ໄດ້ບັນເລງດົນຕີຍົວະຍຸຄວາມຕ້ອງການນາມັບປະການ
ຂັບກ່ອມຄາຖາອັນມ່ວນຈັບໃຈ ໜ້າຮັກແພງ

[໔໙໓] ກໍຍ້ອນຊົງສະດັບສຽງຂັບກ່ອມແຫ່ງນາຣີນັ້ນຂັບກ່ອມຢູ່
ການສັນທະໄດ້ເກີດຂຶ້ນແກ່ພຣະກຸມານນັ້ນ
ພຣະອົງຈຶ່ງຊົງສອບຖາມຊົນຜູ້ຢູ່ຮອບ ໆ ຂ້າງນັ້ນວ່າ

[໔໙໔] ນັ້ນສຽງຂອງຜູ້ໃດ ໃຜຂັບຮ້ອງສຳນຽງສຽງສູງ ໆ ຕ່ຳ ໆ
ໄດ້ຢ່າງມ່ວນຈັບໃຈ ມ່ວນຫູເຮົາຫຼາຍແທ້

(ຂ້າຣາດຊະບໍຣິພານຂາບທູນວ່າ)

[໔໙໕] ຂໍເດຊະພຣະອົງຜູ້ສົມມຸດຕິເທບ ນັ້ນເປັນສຽງສະຕີ
ໜ້າເພີດເພີນບໍ່ແມ່ນໜ້ອຍ ຖ້າພຣະອົງເພິ່ງບໍຣິໂພກການ
ການທັງຫຼາຍຈະເພິ່ງເຮັດພຣະອົງໃຫ້ພໍພຣະທະໄທຍິ່ງຂຶ້ນ

(ພຣະຣາດຊະກຸມານຕັດວ່າ)

[໔໙໖] ເຊີນນາງມາທາງນີ້ ເປັນຫຍັງຄືມາຂັບຮ້ອງຢູ່ໄກແທ້
ຈົ່ງຂັບຮ້ອງຢູ່ໃກ້ ໆ ຕຳໜັກຂອງເຮົານີ້

(ພຣະສາດສະດາຕັດຕໍ່ໄປວ່າ)

[໔໙໗] ນາງຂັບຮ້ອງຢູ່ພາຍນອກຝາຫ້ອງພຣະບັນທົມ
ແລ້ວໄດ້ເລື່ອນເຂົ້າໄປໃນເຮືອນສຳລັບພ່ຳເພັງຊານໂດຍລຳດັບ
ເພື່ອຈະຜູກມັດພຣະກຸມານເໝືອນການຈັບຊ້າງປ່າ

[໔໙໘] ເພາະຊົງຮູ້ຣົດແຫ່ງການ
ຄວາມຣິດສະຫຍາໄດ້ເກີດແກ່ພຣະກຸມານວ່າ
ເຮົາທໍ່ນັ້ນເພິ່ງບໍຣິໂພກການ
ຢ່າເພິ່ງມີຊາຍອື່ນຢູ່ເລີຍ

[໔໙໙] ຕໍ່ແຕ່ນັ້ນ ຊົງຈັບພຣະແສງດາບ
ສະເດັດເຂົ້າໄປຫາຊາຍທັງຫຼາຍ
ເພື່ອຈະຊົງຂ້າຖິ້ມສາ ດ້ວຍພຣະດໍາຣິວ່າ
ເຮົາຄົນດຽວທີ່ນັ້ນຈັກບໍຣິໂພກການ
ຢ່າເພິ່ງມີຊາຍອື່ນຢູ່ໃນບ່ອນນີ້ເລີຍ

[໕໐໐] ແຕ່ນັ້ນ ຊາວຊົນນະບົດທັງປວງໄດ້ມາພ້ອມກັນຄໍ່າຄວນຮ້ອງທຸກວ່າ
ຂໍເດຊະມະຫາຣາດ ພຣະຣາດຊະໂອຣົດພຣະອົງນີ້
ຊົງບຽດບຽນຊົນຜູ້ບໍ່ປະທຸດສະຮ້າຍ ຂ້ານ້ອຍ

[໕໐໑] ກໍຂັດຕິຍະຣາຊາຊົງເນຣະເທດພຣະຣາດຊະໂອຣົດພຣະອົງນັ້ນ
ຈາກຣັດຖະສີມາຂອງພຣະອົງດ້ວຍພຣະບໍຣົມຣາດຊະໂອງການວ່າ
ແວ່ນແຄວັນພໍ່ມີຢູ່ປະມານພຽງໃດ
ເຈົ້າບໍ່ຄວນຢູ່ໃນເຂດມີປະມານພຽງນັ້ນ

[໕໐໔] ຄັ້ງນັ້ນ ພຣະຣາດຊະໂອຣົດນັ້ນຊົງພາພຣະຊາຍາ
ສະເດັດໄປເຖິງອີກຝັ່ງມະຫາສະມຸດແຫ່ງໜຶ່ງ
ຊົງສ້າງບັນສາລາແລ້ວສະເດັດເຂົ້າປ່າເພື່ອຊົງສະແຫວງຫາຜະລາຜົນ

[໕໐໕] ຄັ້ງນັ້ນ ລືສີຕົນໜຶ່ງໄດ້ເຫາະມາເໜືອສະມຸດເຖິງບັນນະສາລານັ້ນ
ທ່ານໄດ້ເຂົ້າໄປສູ່ບັນນະສາລາຂອງພຣະກຸມານນັ້ນ
ໃນເວລາທີ່ນາງກຸມາຣິກາຈັດແຈງພຣະກະຍາຫານ

[໕໐໔] ສ່ວນພຣະຊາຍາໄດ້ປະເລົ້າປະໂລມລືສີນັ້ນ
ເບິ່ງເອົາເທີ້ນ ກໍາທີ່ນາງເຮັດແສນຈະຫຍາບຊ້າພຽງໃດ
ທີ່ລືສີຕົນນັ້ນເຄື່ອນຈາກພົມມະຈັນແລະເສື່ອມຈາກລິດ

[໕໐໕] ຝ່າຍພຣະຣາດຊະບຸດສະແຫວງຫາມູນຜະລາຜົນໃນປ່າໄດ້ເປັນຈໍານວນຫຼາຍ
ຊົງຫາບມາໃນເວລາໃກ້ທ່ຽງວັນ ສະເດັດເຂົ້າໄປສູ່ພຣະອາສົມ
[໕໐໖] ກໍແລ ລືສີພໍເຫັນຂັດຕິຍະກຸມານ
ຈຶ່ງຕັ້ງໃຈວ່າຈະຫຼົບໜີໄປອີກຟາກໜຶ່ງຂອງມະຫາສະມຸດ
ດ້ວຍດໍາຣິວ່າ ເຮົາຈັກເຫາະໄປ ແຕ່ທ່ານກໍຈົມລົງໃນຫ້ວງນໍ້າໃຫຍ່
[໕໐໗] ຝ່າຍຂັດຕິຍະກຸມານທອດພຣະເນດເຫັນລືສີຈົມຢູ່ໃນຫ້ວງນໍ້າໃຫຍ່
ເພື່ອຈະຊົງຊ່ອຍເຫຼືອທ່ານ ຈຶ່ງໄດ້ຕັດຄາຖາເຫຼົ່ານີ້ວ່າ

[໓໐໗] ຕົວທ່ານເອງຍ່າງມາໄດ້ເທິງຜິວນໍ້າບໍ່ແຕກແຍກດ້ວຍລິດ
ເມື່ອເຖິງຄວາມຄຸກຄີກັບຍິງແລ້ວ ຈຶ່ງຈົມລົງໃນຫ້ວງນໍ້າໃຫຍ່

[໓໐໙] ທໍາມະດາຍິງທັງຫຼາຍມີຄວາມໝຸນວຽນປ່ຽນຢູ່ສະເໝີ
ມີມາຍາຫຼາຍ ເຮັດພົມມະຈັນໃຫ້ກໍາເຣີບ
ຍ່ອມຈົມລົງ (ໃນນະຣົກ)
ບຸກຄົນຮູ້ແຈ້ງເນື້ອຄວາມຂໍ້ນັ້ນແລ້ວ ເພິ່ງເວັ້ນໃຫ້ຫ່າງໄກ

[໓໑໐] ຍິງເຫຼົ່ານັ້ນເວົ້າຈາອ່ອນຫວານ ບໍ່ຮູ້ຈັກພໍ
ໃຫ້ເຕັມໄດ້ຍາກເໝືອນກັບແມ່ນໍ້າ ຍ່ອມຈົມລົງ (ໃນນະຣົກ)
ບຸກຄົນຮູ້ແຈ້ງເນື້ອຄວາມຂໍ້ນັ້ນແລ້ວ ເພິ່ງເວັ້ນໃຫ້ຫ່າງໄກ

[໓໑໑] ຍິງເຫຼົ່ານັ້ນຄົບຫາຊາຍໃດ
ດ້ວຍຄວາມພໍໃຈຫຼືດ້ວຍຊັບກໍຕາມ
ຍ່ອມຕາມເຜົາຜານຊາຍນັ້ນທັນທີ
ເໝືອນໄຟປ່າເຜົາຜານພື້ນທີ່ຂອງຕົນເອງ

[໓໑໒] ຄວາມເບື່ອໜ່າຍໄດ້ມີແກ່ລືສີຍ້ອນຟັງພຣະດໍາຣັດຂອງຂັດຕິຍະກຸມານ
ລືສີນັ້ນກັບໄດ້ທາງທີ່ໄດ້ບັນລຸມາກ່ອນ ຈຶ່ງເຫາະກັບໄປ

[໓໑໓] ຝ່າຍຂັດຕິຍະກຸມານຜູ້ຊົງພຣະປີຊາ
ທອດພຣະເນດເຫັນລືສີກໍາລັງເຫາະໄປ
ຊົງໄດ້ຄວາມສັງເວດ ຈຶ່ງນ້ອມພຣະຫະໄທສູ່ບັນພະຊາ

[໓໑໔] ຕໍ່ແຕ່ນັ້ນ ພຣະອົງຊົງບັນພະຊາ
ສໍາຣອກກາມຣາຄະໄດ້ແລ້ວ
ຊົງເຂົ້າເຖິງພົມມະໂລກ ດັ່ງນີ້

**ມະຫາປະໂລພະນະຊາດົກທີ ໑໑ ຈົບ**

## ໑໒. ປັນຈະປັນທິຕະຊາດົກ (໕໐໘)
## ວ່າດ້ວຍບັນດິດ ໕ ຄົນ

(ພຣະຣາຊາຊົງຮັບທີ່ຈະທົດລອງມະໂຫສົດບັນດິດ ຈຶ່ງຕັດສັ່ງວ່າ)

[໓໑໕] ທ່ານບັນດິດທັງ ໕ ມາກັນພ້ອມແລ້ວ
ບັນຫາແຈ້ງຄັກແກ່ເຮົາ ຂໍພວກທ່ານຈົ່ງສະດັບ
ເລື້ອງທີ່ຄວນຕິຕຽນກໍດີ ເລື້ອງທີ່ຄວນສັນເສີນກໍດີ
ເຊິ່ງເປັນຄວາມລັບຂອງເຮົາ ຄວນເປີດເຜີຍແກ່ໃຜດີ

(ເສນະກະບັນດິດຂາບທູນວ່າ)

[໓໑໖] ຂໍເດຊະພຣະພູມິບານ ຂໍພຣະອົງຊົງເປີດເຜີຍກ່ອນ
ພຣະອົງຊົງຊຸບລ້ຽງຂ້າພຣະອົງ
ຊົງອົດກັ້ນຕໍ່ພາຣະອັນໜັກ ໂຜດຖະແຫຼງເນື້ອຄວາມກ່ອນ
ຂໍເດຊະພຣະອົງຜູ້ຈອມຊົນ ນັກປາດທັງ ໕ ພິຈາລະນາ
ສິ່ງທີ່ພໍພຣະຫະໄທແລະສິ່ງທີ່ຖືກພຣະອັດທະຍາໄສຂອງພຣະອົງແລ້ວ
ຈະຂາບທູນພາຍຫຼັງ

(ລໍາດັບນັ້ນ ພຣະຣາຊາຕັດຄາຖານີ້ດ້ວຍຄວາມທີ່ພຣະອົງຊົງຕົກຢູ່ໃນອໍານາດກິເລດວ່າ)

[໓໑໗] ບຸກຄົນຄວນເປີດເຜີຍເລື້ອງທີ່ຄວນຕິຕຽນກໍດີ
ເລື້ອງທີ່ຄວນສັນເສີນກໍດີ ເຊິ່ງເປັນຄວາມລັບ
ແກ່ພັນລະຍາຜູ້ມີສິນ ບໍ່ນອກໃຈສາມີ
ໄປຕາມອໍານາດຄວາມພໍໃຈຂອງສາມີ
ເປັນທີ່ຮັກທີ່ໂຜດປານຂອງສາມີ

(ແຕ່ນັ້ນ ເສນະກະບັນດິດຍິນດີແລ້ວເມື່ອຈະສະແດງເຫດທີ່ຕົນເຮັດໄວ້ເອງ ຈຶ່ງຂາບທູນວ່າ)

[໓໑໘] ບຸກຄົນຄວນເປີດເຜີຍເລື້ອງທີ່ຄວນຕິຕຽນກໍດີ
ເລື້ອງທີ່ຄວນສັນເສີນກໍດີ ເຊິ່ງເປັນຄວາມລັບ
ແກ່ເພື່ອນຜູ້ເປັນບ່ອນເພິ່ງບ່ອນພັກ
ແລະຜູ້ເປັນທາງດໍາເນີນຂອງເພື່ອນຜູ້ຕົກຍາກທຸຣົນທຸຣາຍໄດ້

(ປຸກກຸສະບັນດິດຖືກພຣະຣາຊາຕັດຖາມ ຈຶ່ງຂາບທູນວ່າ)

[໓໑໙] ບຸກຄົນເພິ່ງເປີດເຜີຍເລື້ອງທີ່ຄວນຕິຕຽນກໍດີ
ເລື້ອງທີ່ຄວນສັນເສີນກໍດີ ເຊິ່ງເປັນຄວາມລັບ
ແກ່ອ້າຍຜູ້ໃຫຍ່ ຄົນກາງ ຫຼືແກ່ນ້ອງຊາຍ
ຜູ້ມີສິນຕັ້ງໝັ້ນ ມີຕົນໝັ້ນຄົງ

(ກາມິນທະບັນດິດຖືກພຣະຣາຊາຕັດຖາມ ຈຶ່ງຂາບທູນວ່າ)

[໕໘໐] ບຸກຄົນເພິ່ງເປີດເຜີຍເລື້ອງທີ່ຄວນຕິຕຽນກໍດີ
ເລື້ອງທີ່ຄວນສັນເສີນກໍດີ ເຊິ່ງເປັນຄວາມລັບ
ແກ່ບຸດຜູ້ປົບນິບັດຮັບໃຊ້ບິດາ
ຜູ້ເປັນອະນຸຊາຕະບຸດໄປຕາມບິດາ ມີປັນຍາບໍ່ຕ່ຳຊາມ

(ເທວິນທະບັນດິດຖືກພຣະຣາຊາຕັດຖາມ ຈຶ່ງຂາບທູນວ່າ)

[໕໘໑] ຂໍເດຊະພຣະອົງຜູ້ຈອມຊົນ ປະເສີດກວ່າມະນຸດທັງຫຼາຍ
ບຸກຄົນເພິ່ງເປີດເຜີຍເລື້ອງທີ່ຄວນຕິຕຽນກໍດີ
ເລື້ອງທີ່ຄວນສັນເສີນກໍດີເຊິ່ງເປັນຄວາມລັບ
ແກ່ມານດາຜູ້ລ້ຽງດູບຸດດ້ວຍຄວາມຮັກຄວາມພໍໃຈ

(ມະໂຫສົດບັນດິດຂາບທູນເຫດແຫ່ງຄວາມລັບວ່າ)

[໕໘໘] ທຳມະດາຄວາມລັບປົກປິດໄວ້ທີ່ນັ້ນເປັນການດີ
ການເປີດເຜີຍຄວາມລັບບັນດິດບໍ່ສັນເສີນ
ຍ້ອນເມື່ອຄວາມປາຖະໜາຍັງບໍ່ສຳເລັດ ນັກປາດເພິ່ງອົດກັ້ນໄວ້ກ່ອນ
ຄວາມປາຖະໜາສຳເລັດແລ້ວ ເພິ່ງເວົ້າໄດ້ຕາມສະບາຍ

(ຝ່າຍພຣະນາງອຸທຸມພອນເທວີທູນຖາມເຖິງເຫດແຫ່ງຄວາມໂສກຂອງພຣະຣາຊາວ່າ)

[໕໘໙] ຂໍເດຊະພຣະຣາຊາຜູ້ປະເສີດ ຍ້ອນເຫດໃດ
ພຣະອົງຊົງມີພຣະຫະໄທວິປະຣິດໄປ ຂໍເດຊະພຣະອົງຜູ້ຈອມມະນຸດ
ຂ້ານ້ອຍຂໍຟັງພຣະດຳຣັດຂອງພຣະອົງ
ພຣະອົງຊົງດຳຣິແນວໃດນໍ ຈຶ່ງຊົງໂທມະນັດ
ຂໍເດຊະພຣະອົງຜູ້ສົມມຸດຕິເທບ ຂ້ານ້ອຍບໍ່ມີຄວາມຜິດເລີຍບໍຂ້ານ້ອຍ

(ລຳດັບນັ້ນ ພຣະຣາຊາຕັດຕອບພຣະນາງວ່າ)

[໕໘໔] ໃນເພາະບັນຫາວ່າ ມະໂຫສົດບັນດິດຈະຖືກຂ້າ
ມະໂຫສົດຜູ້ມີປັນຍາພຽງດັ່ງແຜ່ນດິນ ຖືກອ້າຍສັ່ງຂ້າ
ອ້າຍຄິດເຖິງເລື້ອງນັ້ນຈຶ່ງເສຍໃຈ ພຣະເທວີ ນ້ອງບໍ່ມີຄວາມຜິດດອກ

(ພຣະຣາຊາຊົງເຮັດເໝືອນບໍ່ຊົງຮູ້ອັນໃດ ຕັດຖາມມະໂຫສົດບັນດິດວ່າ)

[໓໘໕] ເຈົ້າໄປຕັ້ງແຕ່ຫົວຄໍ່າ ຫາກໍ່ຈະມາດຽວນີ້
ຍ້ອນໄດ້ຟັງເລື້ອງອັນໃດບໍ ໃຈຂອງເຈົ້າຈຶ່ງຫວາດຣະແວງ
ເຊີນເທີ້ນ ເຈົ້າຜູ້ມີປັນຍາພຽງດັ່ງແຜ່ນດິນ
ໃຜໄດ້ຮຽນອັນໃດໃຫ້ເຈົ້າຟັງ
ເຮົາຂໍຟັງຄໍານັ້ນ ເຈົ້າຈົ່ງເລົ່າເລື່ອງນັ້ນໃຫ້ເຮົາຟັງ

(ພຣະໂພທິສັດມະໂຫສົດບັນດິດທູນເຕືອນພຣະຣາຊາວ່າ)

[໓໘໖] ໃນບັນຫາວ່າ ມະໂຫສົດຈະຖືກຂ້າ
ຂໍເດຊະພຣະອົງຜູ້ຈອມຊົນ
ກໍຍ້ອນພຣະອົງສະເດັດຢູ່ໃນບ່ອນລັບ
ໄດ້ຕັດບອກເລື້ອງທີ່ພຣະອົງຊົງເປິກສາແລ້ວແກ່ພຣະເທວີຕອນກາງຄືນ
ຄວາມລັບນັ້ນພຣະເທວີຊົງເປີດເຜີຍແລ້ວ ຂ້າພຣະອົງໄດ້ຟັງມາ

(ພຣະໂພທິສັດມະໂຫສົດບັນດິດຂາບທູນຄວາມລັບຂອງເສນະກະບັນດິດກ່ອນວ່າ)

[໓໘໗] ທ່ານເສນະກະບັນດິດໄດ້ເຮັດກໍາຊົ່ວ
ຢ່າງອະສັດຕະບຸຣຸດອັນໃດໄວ້ທີ່ປ່າໄມ້ຮັງ
ເຂົາຢູ່ໃນບ່ອນລັບແລ້ວໄດ້ບອກແກ່ເພື່ອນຄົນໜຶ່ງ
ຄວາມລັບນັ້ນທ່ານເສນະກະບັນດິດໄດ້ເປີດເຜີຍແລ້ວ
ຂ້າພຣະອົງໄດ້ຟັງມາ

(ພຣະໂພທິສັດມະໂຫສົດບັນດິດຂາບທູນຄວາມລັບຂອງປຸກກຸສະບັນດິດວ່າ)

[໓໘໘] ຂໍເດຊະພຣະອົງຜູ້ຈອມຊົນ ພະຍາດອັນບໍ່ຄູ່ຄວນແກ່ພຣະຣາຊາ
ເກີດຂຶ້ນແລ້ວແກ່ປຸກກຸສະບຸຣຸດຂອງພຣະອົງ
ເຂົາຢູ່ໃນບ່ອນລັບໄດ້ບອກແກ່ອ້າຍນ້ອງຊາຍຄົນໜຶ່ງ
ຄວາມລັບນັ້ນທ່ານປຸກກຸສະບຸຣຸດໄດ້ເປີດເຜີຍແລ້ວ
ຂ້າພຣະອົງໄດ້ຟັງມາ

(ພຣະໂພທິສັດມະໂຫສົດບັນດິດຂາບທູນຄວາມລັບຂອງກາມິນທະບັນດິດວ່າ)

[໓໘໙] ກາມິນທະບັນດິດຜູ້ນີ້ມີອາພາດຢ່າງອະສັດຕະບຸຣຸດ ຖືກນິນເທບເຂົ້າສິງ

ເຂົາຢູ່ໃນບ່ອນລັບໄດ້ບອກແກ່ບຸດຊາຍ
ຄວາມລັບນັ້ນການິນທະບັນດິດໄດ້ເປີດເຜີຍແລ້ວ
ຂ້າພຣະອົງໄດ້ຟັງມາ

(ພຣະໂພທິສັດມະໂຫສົດບັນດິດ ເມື່ອຈະຂາບທູນຄວາມລັບຂອງເທວິນທະບັນດິດ ຈຶ່ງກ່າວຄາ-ຖານີ້ວ່າ)

[໓໓໐] ທ້າວສັກກະເທວະຣາດໄດ້ຊົງປະທານແກ້ວມະນີ ໘ ຫຼ່ຽມ
ອັນຮຸ່ງເຮືອງຍິ່ງນັກແດ່ພຣະໄອຍະກາຂອງພຣະອົງ
ບັດນີ້ ແກ້ວມະນີນັ້ນຕົກຢູ່ໃນມືຂອງເທວິນທະບັນດິດ
ເຂົາຢູ່ໃນບ່ອນລັບໄດ້ບອກແກ່ມານດາ
ຄວາມລັບນັ້ນທ່ານເທວິນທະບັນດິດໄດ້ເປີດເຜີຍແລ້ວ
ຂ້າພຣະອົງໄດ້ຟັງມາ

(ພຣະໂພທິສັດຂາບທູນພຣະຣາຊາແລ້ວສະແດງທຳໃຫ້ຍິ່ງ ໆ ຂຶ້ນໄປວ່າ)

[໓໓໑] ທຳມະດາຄວາມລັບປົກປິດໄວ້ທີ່ນັ້ນເປັນການດີ
ການເປີດເຜີຍຄວາມລັບບັນດິດບໍ່ສັນເສີນ
ເພາະເມື່ອຄວາມປາຖະໜາຍັງບໍ່ສຳເລັດ
ນັກປາດເພິ່ງອົດກັ້ນໄວ້ກ່ອນ
ຄວາມປາຖະໜາສຳເລັດແລ້ວ ເພິ່ງເວົ້າໄດ້ຕາມສະບາຍ

[໓໓໒] ບັນດິດບໍ່ເພິ່ງເປີດເຜີຍຄວາມລັບ
ເພິ່ງຮັກສາຄວາມລັບນັ້ນໄວ້ເໝືອນຮັກສາຂຸມຊັບ
ຍ້ອນວ່າຄວາມລັບບຸກຄົນຮູ້ຢູ່ບໍ່ເປີດເຜີຍໄດ້ເປັນການດີ

[໓໓໓] ບັນດິດບໍ່ຄວນບອກຄວາມລັບແກ່ສະຕີ ໑ ສັດຕູ ໑
ຄົນທີ່ໃຊ້ອາມິດລໍ້ ໑ ຄົນຜູ້ລ້ວງຄວາມລັບ ໑
[໓໓໔] ຄົນຜູ້ຮູ້ຄວາມລັບທີ່ຜູ້ອື່ນບໍ່ຮູ້
ຍ້ອນຢ້ານຄວາມລັບທີ່ເປີກສາຫາຣືກັນໄວ້ຈະແຕກ
ຍ່ອມອົດກັ້ນໄວ້ດັ່ງບຸກຄົນຜູ້ເປັນທາດເຂົາ
[໓໓໕] ຄົນມີປະມານເທົ່າໃດລ່ວງຮູ້ຄວາມລັບທີ່ເຂົາເປີກສາກັນ
ຄົນມີປະມານທໍ່ນັ້ນເປັນບຸກຄົນທີ່ໜ້າຢ້ານກົວຂອງເຂົາ
ເພາະສະນັ້ນ ບຸກຄົນບໍ່ຄວນເປີດເຜີຍຄວາມລັບ

[໓໓໖] ໃນເວລາກາງເວັນຄວນເວົ້າຄວາມລັບໃນບ່ອນສະຫງັດ
ເວລາກາງຄືນບໍ່ຄວນເວົ້າດັງເກີນໄປ
ຍ້ອນເຫດວ່າຄົນຈອບຟັງໄດ້ຍິນຄວາມລັບທີ່ເປີກສາກັນເຂົ້າ
ຄວາມລັບນັ້ນຈະເຖິງການກະຈາຍໄປໄດ້ໄວ

**ປັນຈະປັນທິຕະຊາດົກທີ ໑໘ ຈົບ**

## ໑໓. ຫັດຖິປາລະຊາດົກ (໕໐໙)
## ວ່າດ້ວຍຫັດຖິປາລະກຸມານ

(ຫັດຖິປາລະກຸມານເຫັນລືສີເຫຼົ່ານັ້ນແລ້ວດີໃຈເຫຼື້ອມໃສ ໄດ້ກ່າວ ໓ ຄາຖາວ່າ)

[໓໓໗] ນານແລ້ວນໍ ຂ້າພະເຈົ້າຫາກໍ່ຈະໄດ້ພົບເຫັນພາມ
ຜູ້ມີເພດດັ່ງເທບ ມີຊະດາໃຫຍ່
ມີຂີ້ແຂ້ວເຂິ ມີຫົວເຕັມໄປດ້ວຍຝຸ່ນ

[໓໓໘] ນານແລ້ວນໍ ຂ້າພະເຈົ້າຫາກໍ່ຈະໄດ້ພົບເຫັນ
ລືສີຜູ້ຍິນດີໃນທຳ
ນຸ່ງຜ້າຍ້ອມດ້ວຍນ້ຳຝາດ ມີຜ້າຄາກອງປິດຮ່າງກາຍ

[໓໓໙] ຂໍພຣະຜູ້ເປັນເຈົ້າຜູ້ຈະເລີນຈົ່ງຮັບອາສະນະນ້ຳ
ແລະຜ້າເຊັດຕີນຂອງຂ້າພະເຈົ້າເທີ້ນ
ຂ້າພະເຈົ້າຂໍຖວາຍຂອງມີຄ່າຕ້ອນຮັບພຣະຜູ້ເປັນເຈົ້າຜູ້ຈະເລີນ
ຂໍພຣະຜູ້ເປັນເຈົ້າຜູ້ຈະເລີນຈົ່ງໃຊ້ສອຍຂອງມີຄ່າຂອງຂ້າພະເຈົ້າດ້ວຍເທີ້ນ

(ຕໍ່ມາພຣະຣາດຊະບິດາເມື່ອຊົງພໍ່າສອນພຣະກຸມານຕາມອັດທະຍາໄສ ຈຶ່ງຕັດຄາຖາວ່າ)

[໓໔໐] ຫັດຖິບານລູກຮັກ ເຈົ້າຈົ່ງຮໍາຮຽນວິທະຍາສະແຫວງຫາຊັບ
ປູກຝັງບຸດທິດາໃຫ້ດໍາຣົງຢູ່ໃນເຢົ້າເຮືອນ
ແລ້ວຈົ່ງສະເຫວີຍຄັນທາຣະ ຣະສາຣົມ ແລະວັດຖຸກາມທັງປວງເທີ້ນ
ເປັນນັກບວດໄດ້ໃນເວລາແກ່ ເປັນການດີ
ພຣະອະຣິຍະສັນເສີນຜູ້ບວດນັ້ນວ່າເປັນມຸນີ

(ຫັດຖິປາລະກຸມານໄດ້ກ່າວຄາຖາວ່າ)

[໓໔໑]　ເວດວິທະຍາເປັນຂອງບໍ່ຈິງ
ລາບຄືຊັບມີສະພາບເປັນອັນດຽວກໍຫາບໍ່ໄດ້
ຊົນທັງຫຼາຍຫ້າມຄວາມຊະຣາໄດ້ເພາະລາບຄືບຸດກໍຫາບໍ່ໄດ້
ສັດຕະບຸຣຸດກ່າວຍ້ອງຍໍການປ່ອຍວາງຄັນທາຣະແລະຣະສາຣົມ
ຜົນສຳເລັດຍ່ອມມີໄດ້ ຍ້ອນການທຳຂອງຕົນ

(ພຣະຣາຊາຊົງສະດັບດັ່ງນັ້ນແລ້ວຈຶ່ງຕັດຄາຖາວ່າ)

[໓໔໒]　ຄຳຂອງເຈົ້ານັ້ນເປັນຄຳສັດຢ່າງແທ້ຈິງ
ຜົນສຳເລັດຍ່ອມມີໄດ້ຍ້ອນການກະທຳຂອງຕົນ
ແຕ່ມານດາບິດາຂອງເຈົ້າເຫຼົ່ານີ້ແກ່ເຖົ້າແລ້ວ
ເພິ່ງເຫັນເຈົ້າມີອາຍຸ ໑໐໐ ປີ ບໍ່ມີໂຣກ

(ຫັດຖິປາລະກຸມານສະດັບດັ່ງນັ້ນແລ້ວຈຶ່ງໄດ້ກ່າວ ໒ ຄາຖາວ່າ)

[໓໔໓]　ຂໍເດຊະພຣະມະຫາຣາດ ຜູ້ແກ່ກ້າປະເສີດກວ່ານໍຣະຊົນ
ຄວາມເປັນເພື່ອນກັບຄວາມຕາຍ
ຄວາມເປັນມິດໄມຕີກັບຄວາມແກ່ ເພິ່ງມີແກ່ຜູ້ໃດ
ແລະແມ່ນຜູ້ໃດເພິ່ງຮູ້ໃນການບາງເວລາວ່າ ເຮົາຈັກບໍ່ຕາຍ
ມານດາບິດາເພິ່ງເຫັນຜູ້ນັ້ນມີອາຍຸ ໑໐໐ ປີ ບໍ່ມີໂຣກ

[໓໔໔]　ຖ້າການຍົກເຮືອລົງນ້ຳພາຍໄປ
ນຳຄົນຂ້າມຟາກໄປສູ່ຝັ່ງໄດ້ແມ່ນສັນໃດ
ພະຍາທິແລະຊະຣາກໍສັນນັ້ນ ຍ່ອມນຳສັດໄປສູ່ອຳນາດ
ຂອງມັດຈຸຣາດຜູ້ເຮັດທີ່ສຸດແນ່ນອນ

(ອັດສະປາລະກຸມານເມື່ອຈະສະແດງທຳແກ່ພຣະຣາດຊະບິດາ ຈຶ່ງຕັດ ໒ ຄາຖາວ່າ)

[໓໔໕]　ການທັງຫຼາຍເໝືອນເປືອກຕົມ ເໝືອນຫຼົ່ມ
ເປັນເຄື່ອງນຳໃຈເຫຼົ່າສັດໄປໄດ້ ຂ້າມໄດ້ຍາກ
ເປັນທີ່ຕັ້ງແຫ່ງພະຍາມັດຈຸຣາດ
ສັດທັງຫຼາຍຜູ້ຈົມຢູ່ໃນເປືອກຕົມແລະຫຼົ່ມຄືການນັ້ນ
ເປັນຜູ້ມີອັດຕະພາບຊົ່ວຊາມຍ່ອມຂ້າມເຖິງຝັ່ງຄືພຣະນິບພານບໍ່ໄດ້

[໓໔໖]　ເມື່ອກ່ອນ ອັດຕະພາບນີ້ໄດ້ກະທຳກຳອັນຫຍາບຊ້າໄວ້

ຂ້າພຣະອົງໄດ້ຮັບວິບາກກຳນັ້ນແລ້ວ
ຄວາມພົ້ນຈາກວິບາກກຳນີ້ບໍ່ມີແກ່ຂ້າພຣະອົງເລີຍ
ຂ້າພຣະອົງຈະປິດກັ້ນປົກປັກຮັກສາອັດຕະພາບນັ້ນໄວ້
ຂໍອັດຕະພາບນີ້ຢ່າໄດ້ກະທຳກຳຫຍາບຊ້າອີກເລີຍ

(ໂຄປາລະກຸມານຊົງປະຕິເສດພຣະຣາດຊະບິດາແລ້ວ ຈຶ່ງຕັດຄາຖາວ່າ)

[໓໔໗] ຂໍເດຊະພຣະມະຫາຣາດ ນາຍໂຄບານເມື່ອບໍ່ເຫັນງົວທີ່ຫາຍໄປໃນປ່າ
ຍ່ອມຕາມຫາສັນໃດ ຂໍເດຊະພຣະເຈົ້າເອສຸກາຣີມະຫາຣາດ
ປະໂຫຍດຂອງຂ້າພຣະອົງກໍຫາຍໄປແລ້ວສັນນັ້ນ
ເຫດໃດນໍ ຂ້າພຣະອົງນັ້ນຈະບໍ່ເພິ່ງສະແຫວງຫາ

(ແລະທ່ານໄດ້ຟັງພຣະດຳຣັດຂໍຮ້ອງຂອງພຣະຣາດຊະບິດາແລ້ວ ຈຶ່ງຕັດຄາຖາອີກວ່າ)

[໓໔໘] ຄົນກ່າວຜັດພັ່ງນວ່າ ມື້ອື່ນກໍເສື່ອມ ວ່າ ມື້ຮືນີ້ກໍຍິ່ງເສື່ອມ
ທີຣະຊົນຄົນໃດນໍຈະເພິ່ງຮູ້ວ່າ ອະນາຄົດນັ້ນບໍ່ມີ
ແລ້ວບັນເທົາຄວາມພໍໃຈທີ່ເກີດຂຶ້ນໄດ້

(ອະປາລະກຸມານຂາບທູນປະຕິເສດພຣະຣາດຊະບິດາແລ້ວ ຈຶ່ງຕັດ ໔ ຄາຖາວ່າ)

[໓໔໙] ຂ້າພຣະອົງເຫັນຍິງສາວຄົນໜຶ່ງ
ທ່ອງທ່ຽວໄປເໝືອນຄົນເມົາ ມີດວງຕາເໝືອນດອກກາຣະເກດ
ພະຍາມັດຈຸຣາດໄດ້ພາກຊີວິດນາງໃນປະຖົມໄວເຊິ່ງຍັງບໍ່ໄດ້ບໍຣິໂພກໂພຄະໄປ

[໓໕໐] ສາມຊາຍໜຸ່ມມີຊາດກຳເນີດທີ່ດີ
ມີໃບໜ້າງົດງາມ ຊວດຊົງໜ້າຄົບຫາ
ມີໜວດປະປາຍເໝືອນເກສອນດອກໂກສຸມ
ຍັງຕົກຢູ່ໃນອຳນາດຂອງພະຍາມັດຈຸຣາດ
ຂໍເດຊະພຣະອົງຜູ້ສົມມຸດຕິເທບ
ຂ້າພຣະອົງຈັກຟ້າວລະການມະຄຸນແລະເຄຫະສະຖານອອກບວດ
ຂໍຊົງພຣະກະລຸນາໂຜດອະນຸຍາດ
ໃຫ້ຂ້າພຣະອົງບວດດ້ວຍເທີ້ນ ຂ້ານ້ອຍ

(ປຸໂຣຫິດເມື່ອຈະເປີກສາກັບນາງພາມມະນີ ຈຶ່ງກ່າວຄາຖາວ່າ)

[໓໕໑] ຕົ້ນໄມ້ໄດ້ໂວຫານວ່າຕົ້ນໄມ້ ເພາະມີງ່າທັງຫຼາຍ
ແຕ່ຕົ້ນໄມ້ທີ່ຂາດງ່າ ຊາວໂລກຮຽກວ່າຕໍໄມ້
ແມ່ວາເສດຖີຜູ້ຈະເລີນ ບັດນີ້ເຮົາຂາດບຸດ
ເຖິງເວລາທີ່ຈະທ່ຽວພິກຂາຈານ

(ນາງພາມມະນີເມື່ອຈະນຳຕົວຢ່າງທີ່ເປັນອະດີດມາ ກ່າວອຸທານຄາຖາວ່າ)

[໓໕໔] ນົກກະຮຽນທັງຫຼາຍບິນໄປໃນອາກາດໄດ້ສັນໃດ
ຫົງທັງຫຼາຍທຳລາຍຕາໜ່າງຄືໃຍທີ່ແມງມຸມດຶງຂຶງໄວ້
ໃນປາຍລະດູຝົນບິນໄປໄດ້ສັນນັ້ນ
ລູກແລະຜົວຂອງເຮົາກໍພາກັນໄປໝົດ
ເຫດໃດເຮົາຮູ້ຢູ່ຈະບໍ່ເພິ່ງໄປນຳ

(ພຣະອັກຄະຣະມະເຫສີ ເມື່ອຈະໃຫ້ພຣະຣາຊາຊົງຮູ້ເລື້ອງການດ້ວຍອຸປະມາ ຈຶ່ງຕັດ ໔ ຄາຖາວ່າ)

[໓໕໓] ນົກເຫຼົ່ານີ້ກິນຊີ້ນແລ້ວຄາຍອອກບິນຫຼີກໄປໄດ້
ສ່ວນນົກເຫຼົ່າໃດກິນຊີ້ນແລ້ວບໍ່ຄາຍ
ນົກເຫຼົ່ານັ້ນກໍຕົກຢູ່ໃນເງື້ອມມືຂອງຂ້ານ້ອຍ
[໓໕໔] ຂໍເດຊະພຣະມະຫາຣາດ ພາມໄດ້ຄາຍກາມທັງຫຼາຍຖິ້ມແລ້ວ
ພຣະອົງນັ້ນກັບຈະບໍຣິໂພກກາມນັ້ນອີກ
ຄົນບໍຣິໂພກສິ່ງທີ່ເຂົາຄາຍຖິ້ມແລ້ວເປັນຄົນທີ່ບັນດິດບໍ່ສັນເສີນເລີຍ

(ພຣະຣາຊາເກີດຄວາມສະຫຼົດພຣະທະໄທເມື່ອຈະຊົງຊົມເຊີຍພຣະເທວີ ຈຶ່ງຕັດຄາຖາວ່າ)

[໓໕໕] ບຸຣຸດຜູ້ມີກຳລັງສຸດບຸຣຸດຜູ້ມີກຳລັງຊາມ
ທີ່ຈົມຢູ່ໃນເປືອກຕົມແລະຫຼົ່ມເລນຂຶ້ນໄດ້ສັນໃດ
ແມ່ທິດາແຫ່ງປັນຈາລະນະຄອນຜູ້ຈະເລີນ ແມ່ນພຣະນາງກໍສັນນັ້ນ
ປະຄອງອ້າຍໃຫ້ຂ້າມຂຶ້ນຈາກເປືອກຕົມຄືກາມໄດ້ດ້ວຍຄາຖາສຸພາສິດ

(ພຣະສາດສະດາເມື່ອຈະປະກາດວ່າພຣະຣາຊາຊົງບວດແລ້ວ ຈຶ່ງຕັດພຣະຄາຖາວ່າ)

[໓໕໖] ພຣະເຈົ້າເອສຸກາຣີມະຫາຣາດ ຜູ້ເປັນໃຫຍ່ທົ່ວທິດ
ເມື່ອຕັດພຣະດຳຣັດນີ້ແລ້ວລະແຄວັນຊົງບວດແລ້ວ
ເໝືອນພະຍາຊ້າງຕັດເຄື່ອງຜູກໄດ້ຂາດ

(ຊາວເມືອງປະຊຸມກັນໄປຂາບທູນພຣະຣາດຊະເທວີ ຈຶ່ງກ່າວຄາຖາວ່າ)

[໓໕໗] ກໍພຣະຣາຊາຜູ້ກ້າຫານ ປະເສີດກວ່ານໍຣະຊົນ
ຊົງພໍພຣະຫະໄທການບັນພະຊາ ລະແຄວັ້ນໄປແລ້ວ
ແມ່ນພຣະນາງກໍຈົ່ງຊົງເປັນພຣະຣາຊາຂອງພວກຂ້າພຣະອົງເທີ້ນ
ພວກຂ້າພຣະອົງຖວາຍຄວາມຄຸ້ມຄອງແລ້ວ
ຂໍພຣະນາງຊົງຄອບຄອງຣາດຊະສົມບັດໂດຍທຳເໝືອນພຣະຣາຊາເທີ້ນ

(ພຣະຣາດຊະເທວີຊົງສະດັບຄຳຂາບທູນຂອງມະຫາຊົນແລ້ວ ຈຶ່ງຕັດຄາຖາທີ່ເຫຼືອວ່າ)

[໓໕໘] ກໍພຣະຣາຊາຜູ້ກ້າຫານ ປະເສີດກວ່ານໍຣະຊົນ
ຊົງພໍພຣະຫະໄທການບັນພະຊາ ລະແຄວັ້ນໄປແລ້ວ
ເຖິງເຮົາກໍຈັກລະການທັງຫຼາຍ ເຊິ່ງເປັນທີ່ໜ້າຣື່ນຣົມຍິນດີ
ທ່ອງທ່ຽວໄປຄົນດຽວໃນໂລກ

[໓໕໙] ກໍພຣະຣາຊາຜູ້ກ້າຫານ ປະເສີດກວ່ານໍຣະຊົນ
ຊົງພໍພຣະຫະໄທການບັນພະຊາ ລະແຄວັ້ນໄປແລ້ວ
ເຖິງເຮົາກໍຈັກລະການທັງຫຼາຍທີ່ມີຢູ່ໂດຍທົ່ວໄປ
ທ່ອງທ່ຽວໄປຄົນດຽວໃນໂລກ

[໓໖໐] ການເວລາຍ່ອມລ່ວງເລີຍໄປ ຣາຕີຍ່ອມຜ່ານພົ້ນໄປ
ຊັ້ນແທ່ງໄວກໍລະລຳດັບໄປ ເຖິງເຮົາກໍຈັກລະການທັງຫຼາຍ
ເຊິ່ງເປັນທີ່ໜ້າຣື່ນຣົມຍິນດີທ່ອງທ່ຽວໄປຄົນດຽວໃນໂລກ

[໓໖໑] ການເວລາຍ່ອມລ່ວງເລີຍໄປ ຣາຕີຍ່ອມຜ່ານພົ້ນໄປ
ອາຍຸໄຂກໍໝົດສິ້ນໄປໂດຍລຳດັບແທ່ງໄວ
ເຖິງເຮົາກໍຈັກລະການທັງຫຼາຍທີ່ມີຢູ່ໂດຍທົ່ວໄປ
ທ່ອງທ່ຽວໄປຄົນດຽວໃນໂລກ

[໓໖໒] ການເວລາຍ່ອມລ່ວງເລີຍໄປ ຣາຕີຍ່ອມຜ່ານພົ້ນໄປ
ອາຍຸໄຂກໍໝົດສິ້ນໄປໂດຍລຳດັບແທ່ງໄວ
ເຖິງເຮົາກໍຈັກເປັນຜູ້ເຢືອກເຢັນ ລ່ວງເຄື່ອງຂ້ອງທັງປວງ
ທ່ອງທ່ຽວໄປຄົນດຽວໃນໂລກ

**ຫັດຖິປາລະຊາດົກທີ ໑໓ ຈົບ**

# ໑໔. ອະໂຍຄະຣະຊາດົກ (໕໑໐)

## ວ່າດ້ວຍມະຫາສັດອະໂຍຄະຣະ

(ພຣະໂພທິສັດອະໂຍຄະຣະຣາດ ເມື່ອຈະສະແດງທຳໂຜດພຣະຣາດຊະບິດາ ຈຶ່ງຕັດວ່າ)

[໑໒໑] ສັດຖືປະຕິສົນທິຄັ້ງທຳອິດ ຢູ່ໃນທ້ອງຕະຫຼອດຄືນໜຶ່ງ
ດຳເນີນໄປບໍ່ຫວນກັບເໝືອນເມກໝອກທີ່ຕັ້ງຂຶ້ນແລ້ວລອຍຜ່ານໄປ

[໑໒໔] ນໍຣະຊົນທັງຫຼາຍປະກອບພ້ອມດ້ວຍກຳລັງພົນ
ສູ້ຮົບຢູ່ໃນສົງຄາມ ຈະບໍ່ແກ່ບໍ່ຕາຍກໍຫາບໍ່ໄດ້
ຍ້ອນວ່າມົນທົນແຫ່ງປານະສັດນັ້ນລ້ວນຖືກຊາດແລະຊະຣາບຽດບຽນ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າຈະປະພຶດທຳ

[໑໒໕] ພຣະຣາຊາຜູ້ເປັນໃຫຍ່ແຫ່ງແຄວ້ນ
ຊົງຂົ່ມຂີ່ຣາດຊະສັດຕູຜູ້ມີເສນາປະກອບດ້ວຍອົງ ໔
ມີຮູບຮ່າງເປັນຕາຢ້ານ ເອົາຊະນະໄດ້ທົ່ວທຸກທິດ
ແຕ່ບໍ່ຊົງສາມາດຊະນະເສນາແຫ່ງພະຍາມັດຈຸຣາດໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໑໒໖] ພຣະຣາຊາບາງພວກແວດລ້ອມດ້ວຍກອງທັບຊ້າງ ກອງທັບມ້າ
ກອງທັບລົດ ກອງທັບພົນຍ່າງ
ຍ່ອມພົ້ນຈາກເງື້ອມມືຂອງປັດຈາມິດໄດ້
ແຕ່ບໍ່ອາດຈະຊົງພົ້ນຈາກພະຍາມັດຈຸຣາດໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໑໒໗] ພຣະຣາຊາທັງຫຼາຍຜູ້ຊົງກ້າຫານ ຊົງຫັກຄ້າຍ
ທຳລາຍນະຄອນ ກຳຈັດມະຫາຊົນໄດ້ດ້ວຍກອງທັບຊ້າງ ກອງທັບມ້າ
ກອງທັບລົດ ກອງທັບພົນຍ່າງ
ແຕ່ບໍ່ອາດຈະຊົງຫັກຫານພະຍາມັດຈຸຣາດໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໑໒໘] ຄົດຊະສານທັງຫຼາຍຕົວຕົກມັນ ມີມັນແຕກໄຫຼຍ້ອຍ
ຍ່ອມຍ່ຳຍີບ້ານເມືອງ ເຂັ່ນຂ້າປະຊາຊົນໄດ້
ແຕ່ບໍ່ອາດຈະຍ່ຳຍີພະຍາມັດຈຸຣາດໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໓໖໙] ນາຍຂະມັງທະນູທັງຫຼາຍຜູ້ມີສີມືເຝິກຝົນດີແລ້ວ ເປັນຜູ້ກ້າຫານ
ສາມາດຍິງໄປໄດ້ໄກ ແມ່ນຍຳບໍ່ຜິດພາດ
ແຕ່ບໍ່ອາດຈະຍິງພະຍາມັດຈຸຣາດໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໓໗໐] ສະທັງຫຼາຍຍ່ອມເສື່ອມສິ້ນໄປ
ພື້ນປະຖະພີພ້ອມທັງພູເຂົາແລະຣາວປ່າກໍໝົດສິ້ນໄປ
ເຖິງທຸກສິ່ງທຸກຢ່າງຢູ່ຕະຫຼອດການລະນານເຂົ້າກໍເສື່ອມສິ້ນໄປ
ຍ້ອນສັງຂານທັງປວງນັ້ນຍ່ອມແຕກສະຫຼາຍໄປຕາມການກຳນົດ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໓໗໑] ແທ້ຈິງ ຊີວິດຂອງເຫຼົ່າສັດທັງປວງທັງຍິງຊາຍໃນໂລກນີ້
ມີສະພາບຫວັ່ນໄຫວ ປັ່ນປ່ວນ
ເໝືອນແຜ່ນຜ້າຂອງນັກເລງ ເໝືອນຕົ້ນໄມ້ທີ່ເກີດໃກ້ຝັ່ງ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໓໗໔] ທັງຄົນໜຸ່ມ ທັງຄົນແກ່
ທັງຍິງ ທັງຊາຍ ທັງບັນເດາະ (ກະເທຍ)
ຍ່ອມມີກາຍແຕກທຳລາຍໄປເໝືອນໝາກໄມ້ຫຼົ່ນຈາກຕົ້ນ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໓໗໓] ດວງຈັນເຊິ່ງເປັນຣາຊາແຫ່ງດວງດາວເປັນສັນໃດ
ໄວນີ້ບໍ່ເປັນສັນນັ້ນ ຍ້ອນສ່ວນໃດລ່ວງໄປແລ້ວ
ສ່ວນນັ້ນເປັນອັນລ່ວງໄປແລ້ວໃນບັດນີ້
ອັນໜຶ່ງ ຄົນແກ່ເຖົ້າຊະຣາແລ້ວບໍ່ມີຄວາມຍິນດີ ຄວາມສຸກຈະມີແຕ່ບ່ອນໃດ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໓໗໔] ຍັກ ພີສາດ ຫຼືແມ່ນເປຕທັງຫຼາຍເຫຼົ່ານັ້ນໂກດຂຶ້ນມາແລ້ວ
ຍ່ອມເຂົ້າສິງມະນຸດທັງຫຼາຍໄດ້ ແຕ່ບໍ່ອາດຈະເຂົ້າສິງພະຍາມັດຈຸຣາດໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໓໗໕] ຍັກ ພີສາດ ຫຼືແມ່ນເຜດທັງຫຼາຍເຫຼົ່ານັ້ນໂກດຂຶ້ນມາແລ້ວ
ມະນຸດທັງຫຼາຍຍ່ອມກະທຳໃຫ້ອົດໂທດໄດ້ດ້ວຍການບູຊາ
ແຕ່ຈະເຮັດພະຍາມັດຈຸຣາດໃຫ້ອົດໂທດດ້ວຍການບູຊາບໍ່ໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໕໗໖] ພຣະຣາຊາທັງຫຼາຍຊົງຮູ້ຄວາມຜິດຢ່າງແຈ່ມແຈ້ງແລ້ວ
ຈຶ່ງຊົງລົງອາດຍາຄົນຜູ້ມີຄວາມຜິດ
ຜູ້ປະທຸດສະຮ້າຍ ແລະຜູ້ບຽດບຽນປະຊາຊົນ
ແຕ່ບໍ່ຊົງສາມາດຈະລົງອາດຍາພະຍາມັດຈຸຣາດໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໕໗໗] ຊົນທັງຫຼາຍຜູ້ທຳຄວາມຜິດ ຜູ້ປະທຸດສະຮ້າຍ
ແລະຜູ້ບຽດບຽນເຫຼົ່ານັ້ນ
ຍ່ອມໄດ້ເພື່ອຈະທູນເກົ້າຖວາຍດິກາຂໍພຣະຣາດຊະທານອະໄພໂທດ
ແຕ່ຈະເຮັດພະຍາມັດຈຸຣາດໃຫ້ອະໄພໂທດບໍ່ໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໕໗໘] ຄວາມເພ່ງເລັງດ້ວຍຄວາມຫວັງດີວ່າ
ຜູ້ນີ້ເປັນກະສັດ ເປັນພາມ
ຜູ້ນີ້ເປັນຄົນມັ່ງຄັ່ງ ເປັນຄົນມີພະລັງ ຫຼືເປັນຄົນມີເດດ
ບໍ່ໄດ້ມີແກ່ພະຍາມັດຈຸຣາດເລີຍ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໕໗໙] ສິງ ເສືອໂຄ່ງ ແລະແມ່ນເສືອເຫຼືອງທັງຫຼາຍ
ຍ່ອມຂົ່ມຂີ່ກັດກິນສັດທີ່ດີ້ນຮົນໄປມາໄດ້
ແຕ່ບໍ່ອາດຈະກັດກິນພະຍາມັດຈຸຣາດໄດ້ເລີຍ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໕໘໐] ນັກມາຍາກົນທັງຫຼາຍເມື່ອສະແດງມາຍາກົນທ່າມກາງສະນາມ
ຍ່ອມລວງຕາປະຊາຊົນໃຫ້ຫຼົງໃຫຼໄດ້ພຽງນັ້ນ
ແຕ່ບໍ່ອາດຈະລວງຕາພະຍາມັດຈຸຣາດໃຫ້ຫຼົງໃຫຼໄດ້ເລີຍ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໕໘໑] ອະສໍຣະພິດທັງຫຼາຍຕົວທີ່ມີພິດຮ້າຍກາດ
ໂກດຂຶ້ນມາແລ້ວຍ່ອມຂົບກັດມະນຸດທັງຫຼາຍໃຫ້ຕາຍໄດ້
ແຕ່ບໍ່ອາດຈະຂົບກັດພະຍາມັດຈຸຣາດໄດ້ເລີຍ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໕໘໔] ອະສໍຣະພິດທັງຫຼາຍໂກດຂຶ້ນມາແລ້ວຍ່ອມຂົບກັດຜູ້ໃດ
ໝໍຜູ້ຮັກສາຍັງຖອນພິດໃນຮ່າງກາຍຂອງຜູ້ນັ້ນໄດ້

ແຕ່ຖອນພິດອັນຮ້າຍກາດຂອງພະຍາມັດຈຸຣາດບໍ່ໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໑໗໓] ນາຍແພດທຳມະມົນຕີ ໑ ນາຍແພດເວຕະຣຸນະ ໑
ນາຍແພດໂພຊະ ໑ ກຳຈັດພິດພະຍານາກທັງຫຼາຍໄດ້
ແຕ່ນາຍແພດເຫຼົ່ານັ້ນ ກໍໄດ້ຍິນມາວ່າ ໄດ້ຕາຍໄປແລ້ວເຊັ່ນກັນ
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໑໗໔] ວິທະຍາທອນທັງຫຼາຍ ເມື່ອສາທະຍາຍເວດຊື່ໂຄຣະມົນ
ຍ່ອມຫາຍຕົວໄປໄດ້ດ້ວຍໂອສົດທັງຫຼາຍ
ແຕ່ຈະສາທະຍາຍເວດບໍ່ໃຫ້ພະຍາມັດຈຸຣາດເຫັນບໍ່ໄດ້
ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງມີຄວາມຄິດວ່າ ຈະປະພຶດທຳ

[໑໗໕] ທຳແລຍ່ອມຮັກສາຜູ້ປະພຶດທຳ
ທຳທີ່ບຸກຄົນປະພຶດດີແລ້ວ ຍ່ອມນຳຄວາມສຸກມາໃຫ້
ນີ້ເປັນອານິສົງໃນທຳທີ່ບຸກຄົນປະພຶດດີແລ້ວ
ຜູ້ມີປົກກະຕິປະພຶດທຳຍ່ອມບໍ່ໄປສູ່ທຸກຄະຕິ

[໑໗໖] ສະພາວະທັງ ໒ ຄື ທຳແລະອະທຳ
ມີຜົນວິບາກບໍ່ສະເໝີກັນ
ຍ້ອນອະທຳນຳສັດໄປນະຮົກ
ສ່ວນທຳຍັງສັດໃຫ້ເຖິງສຸກຄະຕິໂລກສະຫວັນ ດັ່ງນີ້

**ອະໂຍຄະຣະຊາດົກທີ ໑໔ ຈົບ**

## ລວມຊາດົກທີ່ມີໃນນິບາດນີ້ ຄື

໑. ມາຕັງຄະຊາດົກ
໒. ສີວິຣາດຊະຊາດົກ
໓. ໂຣຫະນະມິຄະຊາດົກ
໔. ສີຣີມັນຕະຊາດົກ
໕. ໂສມະນັດສະຊາດົກ
໖. ຈູລະຫັງສະຊາດົກ
໗. ສັດຕິຄຸມພະຊາດົກ
໘. ຈິດຕະສຳພູຕະຊາດົກ
໙. ພັນລາຕິຍະຊາດົກ
໑໐. ຈຳເປີຍຍະຊາດົກ
໑໑. ມະຫາປະໂລພະນະຊາດົກ
໑໒. ຫັດຖິປາລະຊາດົກ
໑໓. ປັນຈະປັນທິຕະຊາດົກ
໑໔. ອະໂຍຄະຣະຊາດົກ

**ວີສະຕິນິບາດ ຈົບ**

# ໑໖. ຕິງສະຕິນິບາດ

## ໑. ກິງສັນທະຊາດົກ (໕໑໑)

## ວ່າດ້ວຍດາບົດຜູ້ມີຄວາມພໍໃຈອັນໃດ

(ເທບທິດາຜູ້ຮັກສາແມ່ນ້ຳກ່າວກັບກິງສັນທະດາບົດວ່າ)

[໑] ທ່ານພາມ ທ່ານພໍໃຈອັນໃດ
ປະສົງອັນໃດ ປາດຖະໜາອັນໃດ
ສະແຫວງຫາອັນໃດຢູ່ ແລະຍ້ອນຕ້ອງການອັນໃດ
ຈຶ່ງມາຢູ່ແຕ່ຜູ້ດຽວໃນລະດູຮ້ອນ

(ດາບົດໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໒] ໝັ້ນນ້ຳໃບໃຫຍ່ມີຊວດຊົງງົດງາມສັນໃດ
ໝາກມ່ວງສຸກທີ່ອຸດົມໄປດ້ວຍສີ ກິ່ນ ແລະຣົດກໍອຸປະໄມໄດ້ສັນນັ້ນ

[໓] ໝາກມ່ວງນັ້ນລອຍມາຕາມກະແສນ້ຳທ່າມກາງສາຍນ້ຳໃສ
ອາດຕະມາເຫັນແລ້ວຈຶ່ງຍື່ນມືໄປເກັບມັນ ນຳມາເກັບໄວ້ໃນໂຮງບູຊາໄຟ

[໔] ແຕ່ນັ້ນອາດຕະມາເອງວາງໝາກມ່ວງໄວ້ເທິງໃບຕອງ ໃຊ້ມີດຝານແລ້ວສັນ
ໝາກມ່ວງນັ້ນຣະງັບຄວາມຫິວກະຫາຍຂອງອາດຕະມາແລ້ວ

[໕] ອາດຕະມານັ້ນປາສະຈາກຄວາມກະວົນກະວາຍ
ໝາກມ່ວງໝົດໄປ ກໍໄດ້ແຕ່ຂົມຄວາມທຸກ
ຍັງບໍ່ປະສົບໝາກໄມ້ຢ່າງອື່ນຊະນິດໃດຊະນິດໜຶ່ງເລີຍ

[໖] ໝາກມ່ວງສຸກໜ່ວຍໃດມີຣົດແຊບ ມີຣົດເປັນເລີດ ໜ້າພໍໃຈ
ລອຍມາໃນຫ້ວງມະຫັນນົບ ອາດຕະມາເກັບຂຶ້ນມາຈາກທະເລ
ໝາກມ່ວງສຸກໜ່ວຍນັ້ນເຮັດອາດຕະມາໃຫ້ຈ່ອຍແຫ້ງ
ຈັກນຳຄວາມຕາຍມາໃຫ້ອາດຕະມາແນ່ນອນ

[໗] ອາດຕະມາເຝົ້າປະຈຳຢູ່ຍ້ອນເຫດໃດ
ເຫດນັ້ນທັງໝົດ ອາດຕະມາໄດ້ບອກແກ່ທ່ານແລ້ວ

ອາດຕະມານັ່ງເຝົ້າຢູ່ສະເພາະແມ່ນ້ຳສາຍທີ່ໜ້າອອນຊອນ
ແມ່ນ້ຳສາຍນີ້ກວ້າງໃຫຍ່ໄພສານ
ຂວັກໄຂວ່ໄປດ້ວຍປາໂລມາຕົວໃຫຍ່ ໆ

[໘] ແມ່ນາງຜູ້ບໍ່ແອບແຝງຕົນ
ແມ່ນາງນັ້ນແລຈົ່ງບອກແກ່ອາດຕະມາເທີ້ນ
ແມ່ນາງຜູ້ມີເຮືອນຮ່າງສະງ່າງາມ ນາງເປັນໃຜກັນ
ແລະມາບ່ອນນີ້ຍ້ອນເຫດອັນໃດ

[໙] ເທບນາຣີເຫຼົ່າໃດຜູ້ມີເຮືອນຮ່າງຄືດັ່ງແຜ່ນຄຳທີ່ຂັດສີດີແລ້ວ
ຫຼືຄືດັ່ງນາງພະຍັກທີ່ເກີດຢູ່ຕາມຮ່ອມພູ
ເປັນປະຣິຈາຣິກາຂອງເທບ ມີຢູ່ໃນໂລກ

[໑໐] ແລະສະຕີຮູບງາມເຫຼົ່າໃດມີຢູ່ໃນມະນຸດໂລກ
ບັນດາເທບນາຣີ ຄົນທັບ ແລະຍິງມະນຸດ
ສະຕີເຫຼົ່ານັ້ນບໍ່ມີຮູບຮ່າງເຊັ່ນກັບແມ່ນາງ
ແມ່ນາງຜູ້ມີລຳຂາອ່ອນກົມສ້ອຍປານດັ່ງແທ່ງຄຳ
ອາດຕະມາຖາມແລ້ວ ຂໍແມ່ນາງຈົ່ງບອກນາມ
ແລະເຜົ່າພັນແກ່ອາດຕະມາດ້ວຍເທີ້ນ

(ເທບທິດາກ່າວວ່າ)

[໑໑] ທ່ານພາມ ທ່ານນັ່ງເຝົ້າຢູ່ສະເພາະ
ແມ່ນ້ຳໂກສິກີອັນໜ້າອອນຊອນສາຍໃດ
ຂ້າພະເຈົ້າຢູ່ທີ່ວິມານມີກະແສນ້ຳໄຫຼແຮງ
ເຊິ່ງເປັນຫ້ວງນ້ຳໃຫຍ່ສາຍນັ້ນ

[໑໒] ລຳທານຈາກພູຫຼວງຫຼາຍ
ດື່ນດາດໄປດ້ວຍໝູ່ໄມ້ນານາພັນ
ໄຫຼລວມກັນ ກົງມາຫາຂ້າພະເຈົ້າ

[໑໓] ອັນໜຶ່ງ ທານນ້ຳຈາກແນວປ່າ ກໍ່ຕົວເປັນຫ້ວງວາຣີສີຂຽວ
ແລະທານນ້ຳອັນເປັນທີ່ພໍໃຈແຫ່ງພວກນາກເປັນຈຳນວນຫຼາຍ
ໄຫຼມາທ່ວມຂ້າພະເຈົ້າດ້ວຍຫ້ວງວາຣີ

[๑๔] สາยນ້ຳເຫຼົ່ານັ້ນຍ່ອມພັດພາໝາກໄມ້ຫຼາຍຊະນິດ
ຄື ໝາກມ່ວງ ໝາກຫວ້າ ໝາກມີ້ປ່າ
ກະທຸ່ມ ໝາກຕານ ແລະໝາກເດື່ອມາເນືອງ ໆ

[๑๕] ໝາກໄມ້ຊະນິດໃດຊະນິດໜຶ່ງຢູ່ຝັ່ງແມ່ນ້ຳທັງ ๘ ຫຼົ່ນລົງໄປໃນນ້ຳ
ໝາກໄມ້ນັ້ນຍ່ອມລອຍໄປຕາມອຳນາດກະແສນ້ຳໂດຍບໍ່ຕ້ອງສົງໄສ

[๑๖] ພຣະອົງຜູ້ຈອມຊົນເປັນປາດ ມີປັນຍາຫຼາຍ
ຂໍພຣະອົງຈົ່ງສະດັບຄຳຂອງຂ້າພະເຈົ້າ ພຣະອົງຮູ້ແນວນີ້ແລ້ວ
ຢ່າຊົງພໍພຣະທະໄທຄວາມເກາະກ່ຽວ
ຊົງປະຕິເສດສາເທີ້ນ

[๑๗] ພຣະຣາດຊະລືສີຜູ້ຜະດຸງແຄວັນໃຫ້ຈະເລີນ
ຂ້າພະເຈົ້າບໍ່ເຂົ້າໃຈຄວາມເປັນບັນດິດຂອງພຣະອົງເລີຍ
ເຊິ່ງພຣະອົງກຳລັງຊົງພຣະຈະເລີນໄວ
ແຕ່ກັບຫວັງຄວາມຕາຍ

[๑๘] ພຣະບິດາ ຄົນທັບ ພ້ອມທັງເທວະດາ
ຍ່ອມຮູ້ຄວາມທີ່ພຣະອົງຕົກຢູ່ໃນອຳນາດແຫ່ງຕັນຫາ
ອັນໜຶ່ງ ລືສີທັງຫຼາຍເຫຼົ່າໃດໃນໂລກ
ຜູ້ສັງລວມຕົນ ມີຕະບະ ຜູ້ເຣີ່ມຕັ້ງຄວາມພຽນ ມີຍົດ
ລືສີແມ່ນເຫຼົ່ານັ້ນກໍຍ່ອມຮູ້ໂດຍບໍ່ຕ້ອງສົງໄສ

(ຕໍ່ແຕ່ນັ້ນ ດາບົດໄດ້ກ່າວວ່າ)

[๑๙] ບາບຍ່ອມບໍ່ຈະເລີນແກ່ນໍຣະຊົນຜູ້ຮູ້
ຍ້ອນຮູ້ທຳທັງປວງ ຮູ້ຄວາມແຕກສະຫຼາຍ
ແລະຮູ້ການຈຸຕິແຫ່ງຊີວິດ ຖ້າເຂົາບໍ່ຈົ່ງໃຈຈະຂ້າຜູ້ອື່ນ

[๘๐] ແມ່ນາງຜູ້ທີ່ໝູ່ລືສີຮູ້ຈັກກັນດີ
ທ່ານເປັນຄົນທີ່ຜູ້ລອຍບາບຮູ້ແຈ້ງຄັກວ່າ
ເປັນຜູ້ເກື້ອກູນແກ່ຊາວໂລກ ແມ່ນາງຜູ້ມີຄວາມງາມ
ທ່ານຍ່ອມສະແຫວງຫາບາບກຳ
ຍ້ອນເຈຣະຈາຄຳເວົ້າທີ່ບໍ່ປະເສີດ

[໔໑] ແມ່ນາງຜູ້ມີສະໂພກງາມພຶງພາຍ
ຖ້າອາດຕະມາຈັກຕາຍຢູ່ແຄມຝັ່ງນໍ້າຂອງທ່ານ
ຊື່ສຽງອັນຊົ່ວຊາມຈັກມາເຖິງທ່ານໂດຍບໍ່ຕ້ອງສົງໄສ
ເມື່ອອາດຕະມາລ່ວງລັບໄປແລ້ວ

[໔໘] ຍ້ອນເຫດນັ້ນແລ ແມ່ນາງຜູ້ມີເຮືອນຮ່າງອັນສວຍງາມ
ທ່ານຈົ່ງຣະວັງບາບກໍາ ເມື່ອອາດຕະມາຕາຍໄປແລ້ວ
ຂໍຊົນທັງປວງຢ່າໄດ້ກ່າວຕິຕຽນທ່ານໃນພາຍຫຼັງເລີຍ

(ເທບທິດາໄດ້ສະດັບດັ່ງນັ້ນແລ້ວ ຈຶ່ງໄດ້ກ່າວວ່າ)

[໔໓] ເຫດນັ້ນຂ້າພະເຈົ້າໄດ້ຮູ້ແລ້ວ
ຂໍພຣະອົງຊົງອົດກັ້ນສິ່ງທີ່ອົດກັ້ນໄດ້ຍາກເທີ້ນ
ຂ້າພະເຈົ້າຍອມຖວາຍຕົນແລະໝາກມ່ວງນັ້ນແກ່ພຣະອົງ
ຜູ້ຊົງລະກາມມະຄຸນທີ່ລະໄດ້ຍາກ
ດໍາຣົງສັນຕິແລະທໍາໄວ້ຢ່າງໝັ້ນຄົງ

[໔໔] ຜູ້ໃດລະສັງໂຍດອັນເປັນສ່ວນເບື້ອງຕົ້ນໄດ້
ແຕ່ຍັງຕິດຢູ່ໃນສັງໂຍດອັນເປັນສ່ວນເບື້ອງປາຍ
ປະພຶດອະທໍາຢູ່ນັ້ນແລ ບາບຍ່ອມຈະເລີນແກ່ຜູ້ນັ້ນ

[໔໕] ເຊີນສະເດັດມາເທີ້ນ ຂ້າພະເຈົ້າຈະຊ່ອຍພຣະອົງ
ຂໍພຣະອົງຊົງຂວນຂວາຍໜ້ອຍໂດຍສ່ວນດຽວເທີ້ນ
ຂ້າພະເຈົ້າຈະນໍາພຣະອົງໄປທີ່ສວນໝາກມ່ວງອັນຮົ່ມເຢັນ
ຂໍພຣະອົງປາສະຈາກຄວາມຂວນຂວາຍຢູ່ເທີ້ນ

[໔໖] ຂໍເດຊະພຣະອົງຜູ້ຊົງຂົ່ມອະຣິຣາດຊະສັດຕູ
ສວນໝາກມ່ວງນັ້ນເຊັ່ງແຊ່ໄປດ້ວຍໝູ່ນົກທີ່ມົວເມົາດ້ວຍຣົດດອກໄມ້
ທົບພະສະກຸນະປັກສີ ຄື ນົກກະຣຽນ ນົກຍູງ ນົກເຂົາ
ແລະນົກສາລິກາກໍມີຢູ່ໃນສວນໝາກມ່ວງນີ້
ແລະໃນສວນນີ້ຍັງມີຝູງທົງສົ່ງສຽງຮ້ອງຣະງົມ
ນົກກາເວົາຟິດຮ້ອງກົກກ້ອງປຸກເຫຼົ່າສັດໃຫ້ຕື່ນຢູ່

[໔໗] ໃນສວນໝາກມ່ວງນີ້ ຕົ້ນໝາກມ່ວງທັງຫຼາຍມີປາຍງ່າເອນລົງ

ດ້ວຍພວງໝາກດົກເຊັ່ນຮວງເຂົ້າສາລີ ມີທັງຕົ້ນຄໍາ ຕົ້ນສົມ
ຕົ້ນກະທຸ່ມ ແລະໝາກຕານສຸກຫ້ອຍຍ້ອຍຢູ່ລຽງຮາຍ

(ດາບົດເຫັນເຜດສະເຫວີຍທິບພະສົມບັດໃນເວລາດວງອາທິດຕົກ ຈຶ່ງໄດ້ກ່າວວ່າ)

[໔໗] ທ່ານຜູ້ປະດັບມາລາ ໂພກ ພູສາ
ປະດັບອາພອນ ສວມໃສ່ກໍາໄລມືກໍາໄລແຂນ
ມີຮ່າງກາຍຫອມຟຸ້ງໄປດ້ວຍຈຸນແກ່ນຈັນ
ໄດ້ຮັບການບໍາເລີຕະຫຼອດຄືນ ສ່ວນກາງເວັນສະເຫວີຍເວທະນາ

[໔໘] ທ່ານມີຍິງ ໑໖,໐໐໐ ນາງເປັນນາງບໍາເລີ
ມີອານຸພາບຫຼາຍແນວນີ້ ຍັງບໍ່ເຄີຍມີ
ໜ້າຂົນພອງສະຫຍອງເກົ້າ

[໔໙] ໃນພົບກ່ອນທ່ານໄດ້ເຮັດບາບກໍາອັນໃດທີ່ນໍາທຸກມາໃຫ້ຕົນ
ທ່ານເຮັດກໍາອັນໃດໄວ້ໃນມະນຸດທັງຫຼາຍ ຈຶ່ງຕ້ອງມາກັດກິນຊີ້ນຫຼັງຂອງຕົນ

(ເຜດຈໍາດາບົດນັ້ນໄດ້ ຈຶ່ງກ່າວວ່າ)

[໕໐] ຂ້າພຣະອົງໄດ້ຮໍ່າຮຽນພຣະເວດ ມົກມຸ່ນຢູ່ໃນກາມທັງຫຼາຍ
ໄດ້ປະພຶດສິ່ງບໍ່ເປັນປະໂຫຍດແກ່ຊົນເຫຼົ່າອື່ນຕະຫຼອດການລະນານ

[໕໑] ຜູ້ທາກິນເທິງຫຼັງຄົນອື່ນຕ້ອງຄວັກເນື້ອຫຼັງຂອງຕົນກິນ
ເໝືອນຂ້າພຣະອົງວັນນີ້ຕ້ອງກັດກິນຊີ້ນຫຼັງຂອງຕົນເອງ

**ກົງສັນທະຊາດົກທີ ໑ ຈົບ**

## ໔. ກຸມພະຊາດົກ (໕໑໔)
## ວ່າດ້ວຍໝໍ້ພິເສດ

(ສັບພະມິດຕະຣາຊາຊົງສົນທະນາກັບທ້າວສັກກະວ່າ)

[໕໒] ທ່ານເປັນໃຜ ມາຈາກສະຫວັນຊັ້ນໄຕຣທິດບໍ?
ຜາກົດຢູ່ໃນນະພາກາດເໝືອນດວງຈັນສ່ອງສະຫວ່າງໃນຍາມຣັດຕິການ
ຣັດສະໝີທັງຫຼາຍແຜ່ຊ່ານອອກຈາກກາຍທ່ານດັ່ງສາຍຟ້າທີ່ແມບຢູ່ໃນອາກາດ

[໓໔] ທ່ານນັ້ນບັນດານເມກທີ່ຂາດລົມໃຫ້ເກີດຂຶ້ນໃນອາກາດໄດ້
ທັງຍ່າງທັງຢືນໃນອາກາດໄດ້ ທ່ານໄດ້ພໍ່າເພັງລິດຂອງເທບ
ຜູ້ບໍ່ຕ້ອງເດີນທາງໄກດ້ວຍຕີນ ເຮັດໃຫ້ເປັນບ່ອນເພິ່ງທ່ານໄດ້ບໍ

[໓໕] ທ່ານອາໄສອາກາດກ້າວຍ່າງມາຢຸດຢູ່
ກ່າວເນື້ອຄວາມນັ້ນວ່າ ທ່ານຈົ່ງຊື້ໝໍ້
ພາມ ທ່ານເປັນໃຜນໍ ໝໍ້ຂອງທ່ານນີ້ມີປະໂຫຍດອັນໃດ
ຂໍທ່ານຈົ່ງບອກເນື້ອຄວາມນັ້ນແກ່ຂ້າພະເຈົ້າ

(ທ້າວສັກກະສະແດງໂທດຂອງສຸຣາວ່າ)

[໓໖] ໝໍ້ນີ້ບໍ່ແມ່ນໝໍ້ເນີຍໃສ ບໍ່ແມ່ນໝໍ້ນ້ຳມັນ
ບໍ່ແມ່ນໝໍ້ນ້ຳອ້ອຍ ແລະບໍ່ແມ່ນໝໍ້ນ້ຳເຜິ້ງ ໂທດຂອງໝໍ້ນີ້ມີຫຼາຍ
ພຣະອົງຈົ່ງສະດັບໂທດຢ່າງຫຼວງຫຼາຍທີ່ມີຢູ່ໃນໝໍ້ນີ້

[໓໗] ບຸກຄົນດື່ມສຸຣາຊະນິດໃດແລ້ວຍ່າງໂຊເຊເພິ່ງຕົກເຫວ ຕົກບໍ່
ຕົກຖ້ຳ ຕົກຂຸມນ້ຳເສຍ ແລະຂຸມໂສໂຄກ
ເພິ່ງບໍຣິໂພກຂອງທີ່ບໍ່ຄວນບໍຣິໂພກໄດ້ຫຼວງຫຼາຍ
ຂໍພຣະອົງຊົງຊື້ໝໍ້ນີ້ເຊິ່ງເຕັມດ້ວຍນ້ຳສຸຣາຊະນິດນັ້ນ

[໓໘] ບຸກຄົນດື່ມສຸຣາຊະນິດໃດແລ້ວບໍ່ເປັນອິດສະຫຼະໃນຈິດ
ທ່ຽວໂຊເຊໄປເໝືອນງົວກິນກາກສຸຣາ
ເປັນເໝືອນຄົນອະນາຖາ ຮ່ວມວົງຂັບຮ້ອງຟ້ອນລຳໄດ້
ຂໍພຣະອົງຊົງຊື້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໓໙] ບຸກຄົນດື່ມສຸຣາຊະນິດໃດແລ້ວເປືອຍກາຍເໝືອນຊີເປືອຍ
ທ່ຽວໄປຕາມຮ່ອມຊອກຊອຍໃນໝູ່ບ້ານ
ມີຈິດຟັ່ນເຟືອນ ມັກນອນເລີຍເວລາ
ຂໍພຣະອົງຊົງຊື້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໔໐] ບຸກຄົນດື່ມສຸຣາຊະນິດໃດລຸກຂຶ້ນແລ້ວຕົວສັ່ນ
ໂຍກຫົວແລະແກວ່ງແຂນໄປມາ
ເຂົ້າຟ້ອນລຳເໝືອນຄົນບ້າ
ຂໍພຣະອົງຊົງຊື້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໘໑]　　ບຸກຄົນດື່ມສຸຣາຊະນິດໃດແລ້ວນອນຫຼັບຈົນຖືກໄຟໄໝ້
ກິນຂອງທີ່ພວກໝາຈອກກັດກິນເຫຼືອເງື່ອນໄດ້
ຍ່ອມໄດ້ຮັບການຈອງຈຳ ການຖືກຂ້າ ແລະຄວາມເສື່ອມຈາກໂພຄະ
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໘໘]　　ບຸກຄົນດື່ມສຸຣາຊະນິດໃດແລ້ວເພິ່ງເວົ້າສິ່ງທີ່ບໍ່ຄວນເວົ້າ
ນັ່ງເວົ້າພໍ່າຢູ່ໃນສະພາ ປາສະຈາກເສື້ອຜ້າ
ມີກາຍເລິະເທິເປິະເປື້ອນ ຈົມຢູ່ໃນກອງຮາກ ເຖິງຄວາມພິນາດ
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໘໙]　　ບຸກຄົນດື່ມສຸຣາຊະນິດໃດແລ້ວອວດເກັ່ງ ມີໃນຕາຂຸ່ນຂວາງ
ສຳຄັນວ່າແຜ່ນດິນທັງໝົດເປັນຂອງເຮົາແຕ່ຜູ້ດຽວ
ພຣະຣາຊາແມ່ນຈະມີມະຫາສະມຸດທັງ ໔ ເປັນຂອບເຂດກໍບໍ່ສະເໝີເໝືອນເຮົາ
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໘໔]　　ບຸກຄົນດື່ມສຸຣາຊະນິດໃດແລ້ວເປັນຄົນຖືຕົວຈັດ
ກໍ່ການຜິດຖຽງວິວາດ ມີນິໄສສໍ່ສຽດ ມີຜິວພັນຊາມ
ມັກເປືອຍກາຍ ຫຼົບລີ້ຢູ່ສະເໝີ ຢູ່ແບບໂຈນ ແບບນັກເລງ
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໘໕]　　ຕະກູນທັງຫຼາຍທີ່ມັ່ງຄັ່ງສົມບູນ
ມີຊັບຕັ້ງຫຼາຍພັນເພິ່ງມີຢູ່ໃນໂລກ
ສຸຣາຊະນິດນີ້ເຮັດໃຫ້ຂາດຈາກຄວາມເປັນທາຍາດໄດ້
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໘໖]　　ເຂົ້າເປືອກ ຊັບສິນ ເງິນ ຄຳ
ໄຮ່ນາ ງົວ ຄວາຍໃນຕະກູນໃດຍ່ອມພິນາດໄປ
ແລະຄວາມຂາດສູນແຫ່ງຕະກູນທີ່ມີຊັບເຄື່ອງພໍໃຈ
ຍ່ອມມີໄດ້ຍ້ອນສຸຣາຊະນິດໃດ
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໘໗]　　ບຸຣຸດດື່ມສຸຣາຊະນິດໃດແລ້ວເປັນເໝືອນຄົນກັກຂະລະຫຍາບຄາຍ
ດ່າພໍ່ແມ່ ຈັບຕ້ອງແມ່ນແມ່ເຖົ້າແລະລູກສະໃພ້
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໔໗] ນາຣີດື່ມສຸຣາຊະນິດໃດແລ້ວເປັນເໝືອນຍິງກັກຂະລະຫຍາບຄາຍ
ດ່າພໍ່ຜົວ ແມ່ຜົວ ແລະສາມີ ຈັບຕ້ອງທາດແລະຄົນໃຊ້ຜູ້ຊາຍ
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໔໙] ບຸກຄົນດື່ມສຸຣາຊະນິດໃດແລ້ວ
ເພິ່ງຂ້າສະມະນະແລະພາມຜູ້ດຳຣົງຢູ່ໃນທຳ
ເຂົາເພິ່ງໄປສູ່ອະບາຍຍ້ອນກຳນັ້ນເປັນເຫດ
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໕໐] ຊົນທັງຫຼາຍດື່ມສຸຣາຊະນິດໃດແລ້ວ
ປະພຶດຊົ່ວທາງກາຍ ວາຈາ ແລະໃຈ
ເພາະປະພຶດຊົ່ວ ພວກເຂົາຍ່ອມຕົກນະຣົກ
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໕໑] ຊົນທັງຫຼາຍແມ່ນບໍລິຈາກເງິນຈຳນວນຫຼາຍ
ອ້ອນວອນຜູ້ໃດໃຫ້ກ່າວຕົວະບໍ່ໄດ້ ໃນການກ່ອນ
ຜູ້ນັ້ນດື່ມສຸຣານັ້ນແລ້ວກໍເວົ້າໂລເລບໍ່ໄວ້ວາງໃຈໄດ້
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໕໒] ໃນການຮັບໃຊ້ ຄົນດື່ມສຸຣາຊະນິດໃດແລ້ວຖືກເຂົາໃຊ້ໄປ
ເມື່ອເກີດວຽກງານຮີບຟ້າວ ເຂົາແມ່ນຖືກຖາມກໍບໍ່ຮູ້ເລື້ອງ
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໕໓] ຄົນເມົາທັງຫຼາຍຍ້ອນຄວາມເມົາມາຍ
ແມ່ນມີຄວາມລະອາຍໃຈກໍກະທຳຄວາມບໍ່ລະອາຍໃຫ້ຜາກົດໄດ້
ແມ່ນເປັນຄົນດີມີປັນຍາກໍເວົ້າຫຼາຍ
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໕໔] ບຸກຄົນດື່ມສຸຣາຊະນິດໃດແລ້ວມັກນອນສຸມຫົວກັນ
ອົດເຂົ້າປາອາຫານ ນອນເປັນທຸກຢູ່ເທິງພື້ນດິນ
ຍ່ອມປະສົບກັບຄວາມມີຜິວພັນຊາມແລະການຖືກຕິສິນນິນທາ
ຂໍພຣະອົງຊົງຊີ້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໕໕] ບຸກຄົນດື່ມສຸຣາຊະນິດໃດແລ້ວນອນຄໍຕົກ

ເໝືອນງົວທີ່ຖືກເກາະເຊິ່ງຜູກໄວ້ທີ່ຄໍຕີກະທົບ
ລົດສຸຣາຄ້າຍກັບເຮັດຄົນໃຫ້ມີຄວາມອົດທົນດ້ວຍດີກໍຫາບໍ່ໄດ້
ຂໍພຣະອົງຊົງຊື້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໕໖] ມະນຸດທັງຫຼາຍຍ່ອມເວັ້ນສຸຣາຊະນິດໃດເຊິ່ງປຽບໄດ້ກັບງູມີພິດຮ້າຍ
ໃຜບໍ່ຄວນຈະດື່ມສຸຣາຊະນິດນັ້ນເຊິ່ງເປັນເຊັ່ນກັບຢາພິດໃນໂລກ
ຂໍພຣະອົງຊົງຊື້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໕໗] ພວກໂອຣົດຂອງທ້າວອັນທະກະສະເຫວີຍສຸຣາຊະນິດໃດແລ້ວ
ພາຍິງໄປບໍາເລີໃກ້ຝັ່ງສະມຸດ
ໄດ້ໃຊ້ສາກປະຫັດປະຫານກັນແລະກັນ
ຂໍພຣະອົງຊົງຊື້ໝໍ້ນີ້ເຊິ່ງເຕັມດ້ວຍສຸຣາຊະນິດນັ້ນ

[໕໘] ບຸຣະພະເທບ (ຄືອະສູນທັງຫຼາຍ) ດື່ມສຸຣາຊະນິດໃດແລ້ວເມົາມາຍ
ຈຸຕິຈາກສະຫວັນຊັ້ນໄຕຣທົດ ຍັງສໍາຄັນຕົນວ່າທ່ຽງ
ເປັນໄປກັບດ້ວຍອະສູນມາຍາ ພຣະມະຫາຣາດ ບຸກຄົນເມື່ອຮູ້
ນໍ້າເມົານີ້ວ່າບໍ່ມີປະໂຫຍດ ຈະເພິ່ງດື່ມນໍ້າຊະນິດນັ້ນໄປເຮັດຫຍັງ

[໕໙] ພຣະມະຫາຣາດ ໃນໝໍ້ນີ້ບໍ່ມີນົມສົ້ມຫຼືນໍ້າເຜີ້ງຢູ່ເລີຍ
ພຣະອົງຊົງຮູ້ແນວນີ້ແລ້ວ ຂໍຊົງຊື້ເທີ້ນ
ພຣະເຈົ້າສັບພະມິດ ສິ່ງຂອງທັງຫຼາຍເຊິ່ງມີຢູ່ໃນໝໍ້ນີ້
ຂ້າພຣະອົງໄດ້ຂາບທູນພຣະອົງຕາມຄວາມເປັນຈິງແນວນັ້ນແລ້ວແລ

(ພຣະຣາຊາຊົງສະດັບດັ່ງນັ້ນແລ້ວເຫັນໂທດຂອງສຸຣາ ຈຶ່ງຊົງຊົມເຊີຍທ້າວສັກກະວ່າ)

[໖໐] ເຖິງບິດາມານດາຂອງຂ້າພະເຈົ້າບໍ່ເໝືອນທ່ານ
ຜູ້ຊ່ອຍເຫຼືອເກື້ອກູນຫວັງປະໂຫຍດສູງສຸດ
ວັນນີ້ຂ້າພະເຈົ້າຈະເຊື່ອຟັງຄໍາຂອງທ່ານ

[໖໑] ຂ້າພະເຈົ້າຈະໃຫ້ບ້ານສ່ວຍ ໕ ເຂດ
ສາວໃຊ້ ໑໐໐ ຄົນ ງົວ ໗໐໐ ຕົວ
ແລະລົດທຽມມ້າອາຊາໄນ ໑໐ ຄັນນີ້ແກ່ທ່ານ
ທ່ານເປັນອາຈານຜູ້ຫວັງປະໂຫຍດແກ່ຂ້າພະເຈົ້າ

(ທ້າວສັກກະເມື່ອຈະໃຫ້ພຣະຣາຊາຮູ້ວ່າຕົນເປັນເທວະດາ ຈຶ່ງຕັດວ່າ)

[໖໘] ພຣະມະຫາຣາດ ທາດຍິງ ໑໐໐ ຄົນ ບ້ານສ່ວຍ ງົວທັງຫຼາຍ
ແລະລົດຫງຸມມ້າອາຊາໄນທັງຫຼາຍຂອງພຣະອົງ
ຈົ່ງເປັນຂອງພຣະອົງເທີ້ນ
ຂ້າພຣະອົງເປັນທ້າວສັກກະຜູ້ເປັນຈອມເທບຊັ້ນໄຕຣທິດ

[໖໙] ຂໍພຣະອົງຈົ່ງສະເຫວີຍພຣະກະຍາຫານທີ່ປຸງດ້ວຍຊີ້ນ
ເຂົ້າປາຍາດທີ່ປະສົມດ້ວຍເນີຍໃສ
ແລະຈົ່ງສະເຫວີຍເຂົ້າໜົມກຸມມາດທີ່ປຸງດ້ວຍນ້ຳເຜີ້ງເທີ້ນ
ພຣະອົງຜູ້ຈອມຊົນ ຂໍພຣະອົງຈົ່ງຊົງຍິນດີໃນທຳ
ອັນໃຜ ໆ ບໍ່ຕິຕຽນແລ້ວ ເຂົ້າເຖິງແດນສະຫວັນເທີ້ນ

**ກຸມພະຊາດົກທີ ໘ ຈົບ**

# ໙. ຊະຍັດທິສະຊາດົກ (໕໑໓)
# ວ່າດ້ວຍພຣະເຈົ້າປັນຈາລະພະນາມວ່າໄຊຍະທິດ

(ຍັກຈັບພຣະຫັດຂອງພຣະຣາຊາແລ້ວຂາບທູນວ່າ)

[໖໘] ນານແທ້ນໍ ວັນນີ້ພັກສາໄດ້ເກີດຂຶ້ນແກ່ເຮົາແລ້ວ
ເຮົາໄດ້ອາຫານໃນວັນ ກ ຄ່ຳ ທ່ານເປັນໃຜ ມາຈາກໃສ
ຂໍເຊີນທ່ານບອກເນື້ອຄວາມນັ້ນແລະຊາດສະກຸນຕາມທີ່ທ່ານຮູ້ເທີ້ນ

(ພຣະຣາຊາຊົງເຫັນຍັກແລ້ວ ຕົກພຣະຫະໄທ ຕໍ່ມາຊົງລວບລວມສະຕິໄດ້ແລ້ວຈຶ່ງຕັດວ່າ)

[໖໕] ຂ້າພະເຈົ້າຄືພຣະເຈົ້າປັນຈາລະນາມວ່າໄຊຍະທິດ ເຂົ້າມາລ່າສັດ
ບາງເທື່ອທ່ານອາດເຄີຍໄດ້ຍິນມາແລ້ວ
ເຮົາທ່ຽວໄປຕາມແນວເຂົາແລະປ່າ
ວັນນີ້ທ່ານຈົ່ງກິນຊີ້ນຟານນີ້ແທນ ປ່ອຍຂ້າພະເຈົ້າໄປເທີ້ນ

(ຍັກຂາບທູນວ່າ)

[໖໖] ພຣະອົງເມື່ອຖືກຂ້າພຣະອົງບຽດບຽນ
ກັບຊົງແລກພຣະອົງກັບຂອງທີ່ຂ້າພຣະອົງມີຢູ່
ຊີ້ນຟານທີ່ພຣະອົງກ່າວເຖິງເປັນພັກສາຂອງຂ້າພຣະອົງ
ຂ້າພຣະອົງກິນພຣະອົງແລ້ວຈຶ່ງກິນຊີ້ນຟານຕໍ່
ເວລານີ້ບໍ່ແມ່ນເວລາມາຂໍຮ້ອງກັນ

(ພຣະຣາຊາຊົງຫວນຣະນຶກເຖິງບັນທະພານ ຈຶ່ງຕັດວ່າ)

[໕໗] ຖ້າວ່າ ຂ້າພະເຈົ້າລອດພົ້ນໄປບໍ່ໄດ້ດ້ວຍການແລກປ່ຽນ
ກໍຂໍໃຫ້ຂ້າພຣະເຈົ້າກັບໄປເພື່ອໃຫ້ຊັບແກ່ພານ
ທີ່ຂ້າພຣະເຈົ້າໄດ້ໃຫ້ສັນຍາໄວ້
ຂ້າພະເຈົ້າຜູ້ຮັກສາຄວາມສັດຈັກກັບມາອີກແນ່ນອນ

(ຍັກຂາບທູນວ່າ)

[໕໘] ພຣະມະຫາຣາດ ກຳອັນໃດນໍ?
ທີ່ເຮັດໃຫ້ພຣະອົງຜູ້ໃກ້ເຖິງການສະຫວັນນະຄົດໄວ້ແນວນັ້ນໄດ້
ຂໍພຣະອົງຕັດບອກກຳນັ້ນແກ່ຂ້າພຣະອົງ
ບາງເທື່ອຂ້າພຣະອົງອາດຈະອະນຸຍາດໃຫ້ພຣະອົງໄປ
ເພື່ອຈະກັບມາໃນມື້ອື່ນນີ້ໄດ້ອີກແດ່

(ພຣະຣາຊາຕັດວ່າ)

[໕໙] ຂ້າພະເຈົ້າໄດ້ໃຫ້ຄວາມຫວັງກ່ຽວກັບຊັບໄວ້ແກ່ພານ
ສັນຍານັ້ນຂ້າພະເຈົ້າໄດ້ຮັບຮອງໄວ້ແລ້ວ
ຍັງບໍ່ໄດ້ເຮັດຕາມຄຳສັນຍານັ້ນເລີຍ
ຂ້າພະເຈົ້າຜູ້ຮັກສາຄວາມສັດຈັກກັບມາອີກຢ່າງແນ່ນອນ

(ຍັກຂາບທູນວ່າ)

[໒໐] ຄວາມຫວັງກ່ຽວກັບຊັບອັນໃດພຣະອົງໄດ້ສ້າງໄວ້ໃຫ້ແກ່ພານ
ສັນຍານັ້ນພຣະອົງຊົງຮັບຮອງໄວ້ແລ້ວ
ຍັງບໍ່ໄດ້ເຮັດຕາມສັນຍານັ້ນ
ຂໍພຣະອົງຈົ່ງຊົງຮັກສາຄວາມສັດສະເດັດກັບມາອີກເທີ້ນ

(ພຣະສາດສະດາເມື່ອຊົງສະແດງຄວາມນັ້ນ ຈຶ່ງໄດ້ຕັດວ່າ)

[໒໑] ກໍພຣະເຈົ້າໄຊຍະທິດນັ້ນລອດພົ້ນຈາກເງື້ອມມືຂອງຍັກໂປຣິສາດແລ້ວ
ຊົງຮີບສະເດັດໄປສູ່ພຣະຣາດຊະມົນທຽນຂອງພຣະອົງ
ຊົງຫວັງຈະປົດເປື້ອງຄຳສັນຍາໃນການທີ່ຈະໃຫ້ຊັບແກ່ພານ
ຮັບສັ່ງຮຽກທາອະລິນະຣາດຊະບຸດເຂົ້າມາເຝົ້າຕັດວ່າ

[໗໔] ລູກຈົ່ງອະພິເສກຣາດຊະສົມບັດໃນວັນນີ້
ຈົ່ງປະພຶດທຳໃນບໍລິວານຂອງຕົນແລະແມ່ນໃນບຸກຄົນເຫຼົ່າອື່ນ
ອັນໜຶ່ງ ການປະພຶດອະທຳຂໍຢ່າໄດ້ມີໃນແຄວ້ນຂອງລູກ
ສ່ວນພໍ່ຈະກັບໄປສຳນັກຂອງຍັກໂປຣິສາດ

(ພຣະຣາດຊະກຸມານຂາບທູນວ່າ)

[໗໓] ຂໍເດຊະພຣະອົງ ຂ້ານ້ອຍເຮັດກຳອັນໃດ
ຈຶ່ງເຮັດໃຫ້ພຣະຣາດຊະບິດາບໍ່ພໍພຣະທະໄທ
ແລະວັນນີ້ພຣະຣາດຊະບິດາຈະໃຫ້ຂ້ານ້ອຍດຳຣົງຣາດຊະສົມບັດ
ຍ້ອນວຽກງານທີ່ເຮັດໃຫ້ພຣະຣາດຊະບິດາບໍ່ພໍພຣະທະໄທອັນໃດ
ຂ້ານ້ອຍປາຖະໜາຈະສະດັບຂໍ້ນັ້ນ ໆ
ແມ່ນຣາດຊະສົມບັດເວັ້ນພຣະຣາດຊະບິດາຂ້ານ້ອຍກໍບໍ່ເພິ່ງປາຖະໜາ

(ພຣະຣາຊາຕັດວ່າ)

[໗໔] ລູກຮັກ ພໍ່ບໍ່ໄດ້ຣະນຶກເຖິງຄວາມຜິດຂອງລູກ
ຍ້ອນການທຳຫຼືຍ້ອນຄຳເວົ້າຂອງລູກນີ້ເລີຍ
ຍ້ອນໃຫ້ສັດຈະໄວ້ກັບຍັກໂປຣິສາດ
ພໍ່ຕ້ອງຮັກສາຄວາມສັດ ຈັກຕ້ອງກັບໄປອີກ

(ພຣະຣາດຊະກຸມານຂາບທູນວ່າ)

[໗໕] ຂ້ານ້ອຍຈັກໄປແທນ ຂໍພຣະອົງປະທັບຢູ່ທີ່ນີ້
ການທີ່ຈະລອດຊີວິດພົ້ນມາຈາກສຳນັກຍັກໂປຣິສາດຍ່ອມບໍ່ມີ
ຂໍເດຊະ ຖ້າພຣະຣາດຊະບິດາຈະສະເດັດໄປແທ້
ຂ້ານ້ອຍກໍຈະຕາມສະເດັດໄປນຳ
ແມ່ນເຮົາທັງ ໒ ຈະບໍ່ລອດຊີວິດກໍຕາມ

(ພຣະຣາຊາຕັດວ່າ)

[໗໖] ລູກຮັກ ນັ້ນເປັນທຳຂອງສັດຕະບຸຣຸດຢ່າງແທ້ຈິງ
ແຕ່ເມື່ອໃດຍັກໂປຣິສາດຜູ້ໂຫດຮ້າຍ
ຂົ່ມຂີ່ທຳລາຍລູກແລ້ວຈະຈັບກິນຢູ່ໃຕ້ຕົ້ນໄມ້
ຂໍ້ນັ້ນເພິ່ງເປັນທຸກຍິ່ງກວ່າການຕາຍຂອງພໍ່ສາອີກ

(ພຣະຣາດຊະກຸມານຂາບທູນວ່າ)

[໗໗] ຂ້ານ້ອຍຈັກເອົາຊີວິດແລກປ່ຽນຊີວິດຂອງສະເດັດພໍ່
ສະເດັດພໍ່ຢ່າໄດ້ສະເດັດໄປສຳນັກຂອງຍັກໂປຣິສາດເລີຍ
ກໍຂ້ານ້ອຍຈັກແລກປ່ຽນເອົາຊີວິດຂອງສະເດັດພໍ່ນັ້ນໄວ້
ຍ້ອນເຫດນັ້ນ ຈຶ່ງຂໍຍອມຕາຍເພື່ອຊີວິດຂອງສະເດັດພໍ່

(ພຣະສາດສະດາເມື່ອຈະປະກາດຄວາມນັ້ນ ຈຶ່ງຕັດວ່າ)

[໗໘] ລຳດັບນັ້ນແລ ພຣະຣາດຊະບຸດຜູ້ຊົງມີພຣະປີຊາ
ຖວາຍບັງຄົມພຣະບາດທັງສອງພຣະມານດາພຣະບິດາແລ້ວສະເດັດຈາກໄປ
ພຣະມານດາຂອງພຣະອົງຊົງຣະທົມທຸກ ລົ້ມລົງພື້ນປະຖະພີ
ສ່ວນພຣະບິດານັ້ນຊົງປະຄອງພຣະພາຫາທັງ ໒
ແລ້ວຊົງກັນແສງຕາມ

(ແລະເມື່ອຈະປະກາດສັດຈະ ຈຶ່ງໄດ້ຕັດຕໍ່ໄປອີກວ່າ)

[໗໙] ພຣະບິດາຊົງຮູ້ຄັກວ່າພຣະໂອຣົດກຳລັງມຸ້ງໜ້າສະເດັດໄປ
ຈຶ່ງຫັນພຣະພັກຕໍ່ເບື້ອງພຣະປະຣິດສະດາງ ປະຄອງອັນຊະລີ
ນະມັດສະການວ່າ ລູກຮັກ ຂໍລູກຈົ່ງມີເທບເຫຼົ່ານີ້ ຄື ທ້າວໂສມະ
ທ້າວວະຣຸນະ ທ້າວປະຊາບໍດີ ພຣະຈັນ ແລະສຸຣິຍະເທບຄຸ້ມຄອງ
ຂໍລູກຈົ່ງໄດ້ຮັບການປ່ອຍຕົວກັບມາ
ຈາກສຳນັກຂອງຍັກໂປຣິສາດດ້ວຍຄວາມປອດໄພເທີ້ນ

(ພຣະຊົນນີຊົງເຮັດສັດຈະກິຣິຍາວ່າ)

[໘໐] ລູກຮັກ ມານດາຂອງພໍ່ຣາມໄດ້ຮັບການຄຸ້ມຄອງຢ່າງດີ
ໄດ້ທຳຄວາມປອດໄພອັນໃດໃຫ້ແກ່ພໍ່ຣາມ
ຜູ້ໄປສູ່ແຄວ້ນຂອງພຣະເຈົ້າທັນຖະກີ
ແມ່ຂໍທຳຄວາມປອດໄພອັນນັ້ນໃຫ້ແກ່ລູກ
ດ້ວຍຄວາມສັດນີ້ ຂໍທວຍເທບເຈົ້າໂຜດຣະນຶກເຖິງລູກ
ຂໍລູກຈົ່ງໄດ້ຮັບອະນຸຍາດກັບມາດ້ວຍຄວາມປອດໄພເທີ້ນ

(ພຣະພະຄິນີຊົງເຮັດສັດຈະກິຣິຍາວ່າ)

[໗໑]	ນ້ອງນຶກບໍ່ອອກເລີຍວ່າ
ແມ່ນວ່າດ້ວຍພຽງແຕ່ການຄິດປະທຸດສະຮ້າຍ
ເຈົ້າອ້າຍອະລິນໃນບ່ອນແຈ້ງຫຼືບ່ອນລັບ
ດ້ວຍຄວາມສັດນີ້ ຂໍທວຍເທບໂຜດຣະນຶກເຖິງເຈົ້າອ້າຍ
ຂໍເຈົ້າອ້າຍຊົງໄດ້ຮັບອະນຸຍາດກັບມາດ້ວຍຄວາມປອດໄພເທີ້ນ

(ພຣະຊາຍາຊົງເຮັດກິຣິຍາວ່າ)

[໗໘]	ຂໍເດຊະພຣະສະວາມີ ກໍເພາະພຣະອົງບໍ່ໄດ້ປະພຶດນອກໃຈ
ຂ້ານ້ອຍເລີຍ ສະນັ້ນ ພຣະອົງບໍ່ໄດ້ເປັນທີ່ຮັກຈາກໃຈຂ້ານ້ອຍກໍຫາບໍ່ໄດ້
ດ້ວຍຄວາມສັດນີ້ ຂໍທວຍເທບໂຜດຣະນຶກເຖິງພຣະອົງ
ຂໍພຣະອົງຊົງໄດ້ຮັບອະນຸຍາດກັບມາດ້ວຍຄວາມປອດໄພເທີ້ນ

(ເມື່ອແລ້ວມາຮອດໃນສຳນັກຂອງຍັກ ຍັກໄດ້ກ່າວວ່າ)

[໗໓]	ເຈົ້າມີຮ່າງກາຍສູງໃຫຍ່ ໃບໜ້າງາມ ມາຈາກໃສ
ເຈົ້າບໍ່ຮູ້ບໍວ່າເຮົາຢູ່ໃນປ່າ
ໃຜ ໆ ເຂົາກໍຮູ້ຈັກເຮົາຜູ້ຊົ່ວຮ້າຍວ່າ ເປັນຍັກກິນຄົນ
ມີໃຜບໍ ເມື່ອຮູ້ວ່າໃນນີ້ມີໄພແລ້ວຈະກ້າເຂົ້າມາ

(ພຣະຣາດຊະກຸມານຕັດວ່າ)

[໗໔]	ນາຍພານ ເຮົາຮູ້ວ່າທ່ານກິນຄົນ
ເຮົາຈະບໍ່ຮູ້ວ່າທ່ານຢູ່ໃນປ່າກໍຫາບໍ່ໄດ້
ເຮົາເປັນພຣະໂອຣົດຂອງພຣະເຈົ້າໄຊຍະທິດ
ຍ້ອນຕ້ອງການຈະປົດເປື້ອງພຣະບິດາຈາກສັນຍາທີ່ໄດ້ໃຫ້ໄວ້ກັບທ່ານ
ວັນນີ້ທ່ານຈົ່ງປ່ອຍພຣະບິດາ ຈົ່ງກິນເຮົາແທນເທີ້ນ

(ຍັກຂາບທູນວ່າ)

[໗໕]	ເຮົາຮູ້ວ່າທ່ານເປັນພຣະໂອຣົດຂອງພຣະເຈົ້າໄຊຍະທິດ
ຍ້ອນໃບໜ້າແລະຜິວພັນຂອງທ່ານທັງ ໒ ຄ້າຍຄືກັນ
ການທີ່ບຸກຄົນຍອມຕາຍເພື່ອປົດເປື້ອງບິດາຂອງຕົນ
ນີ້ເປັນກຳທີ່ເຮັດໄດ້ຍາກ ແຕ່ທ່ານໄດ້ເຮັດແລ້ວ

(ພຣະຣາດຊະກຸມານຕັດວ່າ)

[໗໖] ໃນເລື້ອງນີ້ເຮົາບໍ່ໄດ້ສໍາຄັນວ່າເຮັດໄດ້ຍາກອັນໃດດອກ
ບຸກຄົນໃດຍອມຕາຍເພື່ອປົດເປື້ອງບິດາຂອງຕົນ
ຫຼືຍ້ອນເຫດແຫ່ງມານດາ ບຸກຄົນນັ້ນໄປສູ່ປະຣະໂລກແລ້ວ
ຈະເປັນຜູ້ພຽບພ້ອມດ້ວຍຄວາມສຸກແລະອາລົມອັນເລີດ

(ພຣະຣາດຊະກຸມານຖືກຍັກຖາມເຖິງຄວາມບໍ່ຢ້ານຕາຍ ຈຶ່ງຕັດວ່າ)

[໗໗] ກໍເຮົາຣະນຶກບໍ່ໄດ້ຈັກຢ່າງໜຶ່ງ
ເຖິງການທໍາຄວາມຊົ່ວຂອງຕົນທັງໃນບ່ອນແຈ້ງຫຼືບ່ອນລັບ
ເຮົາເປັນຜູ້ມີການເກີດແລະການຕາຍຕາມກໍານົດ
ການພົ້ນຈາກຄວາມຕາຍຍ່ອມບໍ່ມີໃນໂລກນີ້ສັນໃດ
ໃນໂລກໜ້າກໍສັນນັ້ນ

[໗໘] ທ່ານຜູ້ມີອານຸພາບຫຼາຍ ວັນນີ້ທ່ານຈົ່ງກິນເຮົາດຽວນີ້ເທີ້ນ
ຈົ່ງເຮັດກິດທີ່ຄວນເຮັດກັບສະຣີຣະນີ້
ທ່ານພໍໃຈຈະກິນຊີ້ນຂອງເຮົາສ່ວນໃດກໍແລ້ວແຕ່ທ່ານເທີ້ນ

(ຍັກຟັງພຣະດໍາຣັດແລ້ວຕົກໃຈຢ້ານ ຈຶ່ງຂາບທູນວ່າ)

[໗໙] ທ່ານຣາດຊະບຸດ ຖ້າທ່ານພໍໃຈແນວນີ້
ທ່ານຈະສະລະຊີວິດເພື່ອປົດເປື້ອງພຣະບິດາ
ສະນັ້ນ ທ່ານຈົ່ງຮີບຫັກຟືນ ດັງໄຟໃຫ້ລຸກເປັນແປວຂຶ້ນໃນບ່ອນນີ້

(ພຣະສາດສະດາເມື່ອຊົງປະກາດເຫດນັ້ນ ຈຶ່ງຕັດວ່າ)

[໘໐] ລໍາດັບນັ້ນ ພຣະຣາດຊະບຸດຜູ້ຊົງປັຊາໄດ້ລອບລວມຟືນ
ດັງໄຟກອງໃຫຍ່ຂຶ້ນແລ້ວ ຈຶ່ງຕັດບອກໃຫ້ຍັກຮູ້ວ່າ
ບັດນີ້ໄຟກອງໃຫຍ່ເຮົາໄດ້ດັງແລ້ວ

(ພຣະຣາດຊະກຸມານຊົງເຫັນກິຣິຍາຂອງຍັກນັ້ນ ຈຶ່ງຕັດວ່າ)

[໘໑] ບັດນີ້ທ່ານຈົ່ງກິນເຮົາໃນວັນນີ້ເທີ້ນ
ເປັນຫຍັງທ່ານຈຶ່ງຂົນພອງເພ່ງເບິ່ງເຮົາຢູ່ເລື້ອຍ ໆ
ເຮົາທໍາຕາມຄໍາຂອງທ່ານ ຕາມທີ່ທ່ານພໍໃຈຈະກິນເຮົາແລ້ວ

(ຍັກຂາບທູນວ່າ)

[໗໔] ໃຜນໍຄວນທີ່ຈະກິນຄົນຜູ້ດຳຣົງຢູ່ໃນທຳ
ມີປົກກະຕິກ່າວຄຳສັດ ຮູ້ຄຳເວົ້າຂອງຜູ້ຂໍເຊັ່ນທ່ານ
ບຸກຄົນໃດກິນຄົນຜູ້ມີປົກກະຕິກ່າວຄຳສັດເຊັ່ນທ່ານ
ແມ່ນຫົວຂອງບຸກຄົນນັ້ນກໍເພິ່ງແຕກອອກ ໗ ສ່ຽງ

(ພຣະຣາດຊະກຸມານຕັດວ່າ)

[໗໙] ຍ້ອນສຳຄັນທ້າວສັກກະເທວະຣາດນີ້ວ່າເປັນພານ
ຈຶ່ງໄດ້ໃຫ້ສິງຢູ່ໃນສະຣີຣະຂອງຕົນຍັກຍ້ອນເຫດນັ້ນແລ
ຈັນທິມະເທບພະບຸດນັ້ນຈຶ່ງມີຮູບກະຕ່າຍຜາກົດຢູ່
ເຊິ່ງໃຫ້ຄວາມພໍໃຈແກ່ຊາວໂລກຕາບຈົນທຸກວັນນີ້

(ຍັກເມື່ອຈະປ່ອຍພຣະຣາດຊະກຸມານ ຈຶ່ງຂາບທູນວ່າ)

[໗໔] ດວງຈັນແລະດວງອາທິດພົ້ນຈາກປາກຣາຫູແລ້ວຍ່ອມໄພໂຣດ
ໃນດິຖີເພັງ ໑໕ ຄ່ຳສັນໃດ
ທ່ານຜູ້ມີອານຸພາບຫຼາຍ ແມ່ນທ່ານກໍສັນນັ້ນ ພົ້ນແລ້ວຈາກຍັກໂປຣິສາດ
ຈົ່ງຍັງພຣະບິດາແລະພຣະມານດາໃຫ້ປື້ມພຣະຫະໄທ
ຈົ່ງໄພໂຣດໃນກະບິນລະຣັດເທີ້ນ
ອັນໜຶ່ງ ຂໍພຣະປະຍູນຍາດຂອງພຣະອົງທຸກຝ່າຍຈົ່ງມີຄວາມສຸກທົ່ວໜ້າ

(ພຣະສາດສະດາຊົງປະກາດຄວາມນັ້ນວ່າ)

[໗໕] ລຳດັບນັ້ນ ພຣະຣາດຊະບຸດຊົງພະນາມ ອະລີນະສັດຕຸ ຜູ້ຊົງພຣະປີຊາ
ຊົງປະຄອງອັນຊະລີ ຖວາຍບັງຄົມໂປຣິສາທະດາບົດ
ຊົງໄດ້ຮັບອະນຸຍາດສະເດັດກັບກະບິນລະຣັດຢ່າງສຸກສະວັດດີແລະປອດໄພ

(ພຣະສາດສະດ າເມື່ອຈະຊົງສະແດງກິຣິຍາທີ່ຊາວມະຄົດ ຖວາຍການຕ້ອນຮັບພຣະຣາດຊະກຸມານ ຈຶ່ງຕັດວ່າ)

[໗໖] ຊາວນິຄົມ ຊາວຊົນນະບົດ ພົນຊ້າງ ພົນລົດ
ແລະພົນຍ່າງລ້ວນປະຄອງອັນຊະລີ ເຂົ້າເຝົ້າຖວາຍບັງຄົມ
ຂາບທູນພຣະອົງວ່າ ຂໍຖວາຍບັງຄົມແດ່ພຣະອົງ

ພຣະອົງຊົງເປັນຜູ້ເຮັດກິດທີ່ເຮັດໄດ້ຍາກ

**ຊະຍັດທິສະຊາດົກທີ ໓ ຈົບ**

# ໔. ສັດທັນຕະຊາດົກ (໕໑໔)

## ວ່າດ້ວຍພະຍາຊ້າງສັດທັນ

(ພຣະຣາຊາຕັດວ່າ)

[໙໗] ພຣະນ້ອງນາງຜູ້ມີເຮືອນຮ່າງເຫຼືອງອະລ່າມດັ່ງຄຳ
ຜິວພັນຜຸດຜ່ອງ ໄນຕາກໍແຈ່ມໃສໃຫຍ່ກົມ
ເປັນຫຍັງນໍ ຈຶ່ງເສົ້າໂສກ ຊູບຊີດໄປດັ່ງດອກໄມ້ທີ່ຖືກຍ່ອງ

(ພຣະນາງສຸພັດທະຣາຊາບທູນວ່າ)

[໙໘] ຂໍເດຊະພຣະມະຫາຣາດ ຂ້ານ້ອຍແພ້ທ້ອງ
ຂ້ານ້ອຍຝັນເຫັນນິມິດ ຈຶ່ງແພ້ທ້ອງທີ່ບໍ່ໄດ້ງ່າຍເລີຍ

(ພຣະຣາຊາຕັດວ່າ)

[໙໙] ສົມບັດອັນໜ້າຕ້ອງການຊະນິດໃດຊະນິດໜຶ່ງເຊິ່ງເປັນຂອງມະນຸດ
ໃນໂລກທີ່ໜ້າເພີດເພີນນີ້ ທັງໝົດນັ້ນທີ່ເປັນຂອງອ້າຍ
ອ້າຍຂໍມອບໃຫ້ພຣະນ້ອງນາງຕາມທີ່ແພ້ທ້ອງ

(ພຣະນາງສຸພັດທະຣາຊາບທູນວ່າ)

[໑໐໐] ຂໍເດຊະພຣະອົງຜູ້ສົມມຸດຕິເທບ ຂໍນາຍພານທຸກຈຳພວກ
ທີ່ມີຢູ່ໃນແຄວ້ນຂອງເຈົ້າອ້າຍຈົ່ງມາປະຊຸມພ້ອມກັນ
ຂ້ານ້ອຍຈັກບອກການແພ້ທ້ອງຂອງຂ້ານ້ອຍ
ແກ່ພວກພານເຫຼົ່ານັ້ນວ່າເປັນແນວໃດ

(ພຣະຣາຊາຕັດບອກພານເຫຼົ່ານັ້ນແກ່ພຣະຣາດຊະເທວີວ່າ)

[໑໐໑] ພຣະເທວີ ນາຍພານເຫຼົ່ານີ້ລ້ວນມີຄວາມຊຳນານ ແກ່ກ້າ
ຊຳນານປ່າແລະຮູ້ຈັກເນື້ອດີ ຍອມສະລະຊີວິດເມື່ອອ້າຍຕ້ອງການ

(ພຣະຣາດຊະເທວີຕັດກັບພານທັງຫຼາຍວ່າ)

[໑໐໔] ບຸດນາຍພານທັງຫຼາຍ
ພວກທ່ານເທົ່າທີ່ມາປະຊຸມກັນໃນບ່ອນນີ້ ຂໍຈົ່ງຟັງຂ້າພະເຈົ້າ
ຂ້າພະເຈົ້າໄດ້ຝັນເຫັນພະຍາຊ້າງເຜືອກ ງາມີຣັດສະໝີ ໖ ປະການ
ຂ້າພະເຈົ້າຕ້ອງການງາຂອງມັນ ເມື່ອບໍ່ໄດ້ກໍຈະບໍ່ຂໍມີຊີວິດຢູ່

(ພວກບຸດນາຍພານໄດ້ຂາບທູນວ່າ)

[໑໐໕] ຂໍເດຊະພຣະຣາດຊະບຸດຕີ
ພະຍາຊ້າງທີ່ງາມີຣັດສະໝີ ໖ ປະການເຊິ່ງພຣະນາງໄດ້ຊົງສຸບິນເຫັນ
ບິດາຂອງພວກຂ້າພຣະອົງບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຍິນ
ລຸງຂອງພວກຂ້າພຣະອົງກໍບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຍິນ
ຂໍພຣະນາງໂຜດບອກພວກຂ້າພຣະອົງມາເທີ້ນວ່າ
ພະຍາຊ້າງນັ້ນເປັນແນວໃດ

(ບຸດນາຍພານເຫຼົ່ານັ້ນຂາບທູນຕໍ່ໄປວ່າ)

[໑໐໔] ທິດໃຫຍ່ ໔ ທິດ ທິດນ້ອຍ ໔ ທິດ
ທິດເບື້ອງເທິງ ແລະທິດເບື້ອງລຸ່ມ ໑໐ ທິດເຫຼົ່ານີ້
ພະຍາຊ້າງທີ່ງາມີຣັດສະໝີ ໖ ປະການ
ເຊິ່ງພຣະນາງໄດ້ຊົງສຸບິນເຫັນ ຢູ່ທິດໃດ

(ພຣະນາງສຸພັດທະຣາຣາດຊະເທວີຊົງຢຽດພຣະຫັດໄປສູ່ປ່າຫິມະພານ ຕັດວ່າ)

[໑໐໕] ຈາກນີ້ກົງໄປທິດອຸດອນ ຂ້າມພູເຂົາສູງໃຫຍ່ ໗ ໜ່ວຍ
ພູເຂົານັ້ນສູງໃຫຍ່ ຊື່ວ່າສຸວັນນະປັດສະຄີຣີ
ມີພັນບຸບຜະຊາດບານສະພັ່ງ ມີໝູ່ກິນນະຣີສັນຈອນບໍ່ຂາດສາຍ

[໑໐໖] ທ່ານຈົ່ງຂຶ້ນໄປສູ່ເສລະບັນພົດ ເຊິ່ງເປັນບ່ອນຢູ່ຂອງໝູ່ກິນນະຣະ
ແລ້ວຈົ່ງແນມລົງໄປເບື້ອງລຸ່ມຕີນພູ
ທັນໃດນັ້ນທ່ານຈະເຫັນພະຍາຕົ້ນໄຮມີສີສັນງາມ
ສະເໜີເໝືອນເມກມີຍອຍໄຮຫ້ອຍຍ້ອຍຢູ່ ໘,໐໐໐ ຍອຍ

[໑໐໗] ທີ່ໃຕ້ຕົ້ນໄຮນັ້ນພະຍາກຸນຊອນງາມີຣັດສະໝີ ໖ ປະການ

ອາໄສຢູ່ ຍາກທີ່ໃຜອື່ນຈະຂົ່ມເຫງໄດ້
ພະຍາຊ້າງເຜືອກປອດນັ້ນມີຊ້າງປະມານ ໗,໐໐໐ ເຊືອກ
ມີງາງອນງາມເໝືອນງອນລົດ
ແລ່ນໄລ່ປະຫານປັດຈາມິດໄວປານລົມພັດ ແວດລ້ອມຮັກສາຢູ່

[໑໐໗] ຊ້າງເຫຼົ່ານັ້ນຢືນຫັນໃຈເຂົ້າອອກມີສຽງເປັນຕາຢ້ານ
ດຸຮ້າຍແມ່ນຕໍ່ລົມທີ່ມາກະທົບ
ກໍຖ້າເຫັນມະນຸດໃນທີ່ນັ້ນຕ້ອງຢຽບຈົນມຸ່ນເປັນເຖົ້າທຸລີ
ແມ່ນລະອອງທຸລີກໍບໍ່ຕິດພະຍາຊ້າງເຊືອກນັ້ນ

(ເມື່ອໄດ້ຟັງດັ່ງນັ້ນ ໂສນຸດຕະຣະພານຕົກໃຈຢ້ານຄວາມຕາຍ ຈຶ່ງຂາບທູນວ່າ)

[໑໐໘] ຂໍເດຊະພຣະເທວີຂອງຂ້າພຣະອົງ
ເຄື່ອງປະດັບທີ່ເຮັດດ້ວຍຄໍາ ແກ້ວມຸກດາ ແກ້ວມະນີ
ແລະແກ້ວໄພທູນໃນຣາດຊະສະກຸນກໍມີຢູ່ຫຼວງຫຼາຍ
ພຣະແມ່ເຈົ້າຈະເຮັດຫຍັງກັບເຄື່ອງປະດັບທີ່ເຮັດດ້ວຍງາຊ້າງ
ພຣະແມ່ເຈົ້າມີພຣະປະສົງຈະໃຫ້ຂ້າພະຍາຊ້າງງາມີຣັດສະໝີ ໖ ປະການ
ຫຼືຈະໃຫ້ພະຍາຊ້າງຂ້າບຸດນາຍພານກັນແນ່ ຂ້ານ້ອຍ

(ລໍາດັບນັ້ນ ພຣະຣາດຊະເທວີຕັດວ່າ)

[໑໑໐] ພໍ່ພານ ເຮົານັ້ນມີທັງຄວາມຣິດສະຫຍາທັງຄວາມນ້ອຍໃຈ
ເມື່ອຫວນຣະນຶກເຖິງຄວາມຫຼັງຂຶ້ນມາກໍຕອມໃຈ
ທ່ານຈົ່ງຊ່ອຍເຮັດຕາມຄວາມປະສົງຂອງເຮົານັ້ນດ້ວຍເທີ້ນ
ພໍ່ພານ ເຮົາຈະໃຫ້ໝູ່ບ້ານແກ່ທ່ານ ໕ ເຂດ

(ໂສນຸດຕະຣະພານນັ້ນຮັບພຣະເສາວະນີແລ້ວທູນຖາມວ່າ)

[໑໑໑] ພະຍາຊ້າງອາໄສຢູ່ບ່ອນໃດ ເຂົ້າໄປຢືນຢູ່ບ່ອນໃດ
ຫົນທາງໃດເປັນຫົນທາງທີ່ພະຍາຊ້າງຍ່າງໄປອາບນໍ້າ
ກໍພະຍາຊ້າງນັ້ນອາບນໍ້າແນວໃດ
ເຫດໃດນໍຂ້າພຣະອົງຈະຮູ້ຄວາມເປັນໄປຂອງພະຍາຊ້າງໄດ້

(ພຣະຣາດຊະເທວີຕັດບອກເຖິງສະຖານທີ່ເຊິ່ງຈະພົບຊ້າງເຜືອກໄດ້ວ່າ)

[໑໑໔] ໃນສະຖານທີ່ທີ່ພະຍາຊ້າງອາໄສຢູ່ນັ້ນແລ
ມີສະໂບກຂະຣະນີຢູ່ບໍ່ໄກ ໜ້າອອນຊອນ
ມີທ່ານ້ຳສວຍງາມ ທັງມີນ້ຳຫຼາຍ
ມີດອກປະທຸມບານສະພັ່ງ
ມີໝູ່ພະມອນ ເປື້ອນເຄົ້າເກສອນຢູ່ເປັນອາຈິນ
ພະຍາຊ້າງນັ້ນລົງອາບນ້ຳໃນສະໂບກຂະຣະນີນີ້

[໑໑໓] ພະຍາຊ້າງເຜືອກຊຳຣະຫົວແລ້ວ ຫັດດອກອຸບົນ
ມີຮ່າງກາຍຜິວພັນຜຸດຜ່ອງຂາວຄືດອກບຸນທະຣິກ
ຮື່ນເຣິງບັນເທີງໃຈໃຫ້ພຣະນາງສຸພັດທະຣາມະເຫສີ
ຍ່າງນຳໜ້າໄປສູ່ບ່ອນຢູ່ຂອງຕົນ

(ພຣະສາດສະດາເມື່ອຈະຊົງຂະຫຍາຍຄວາມໃຫ້ແຈ້ງ ຈຶ່ງຕັດວ່າ)

[໑໑໔] ນາຍພານນັ້ນຮັບພຣະເສົາວະນີຂອງພຣະນາງທີ່ຜາສາດຊັ້ນທີ ໗
ແລ້ວຈຶ່ງຖືກະບອກລູກສອນແລະທະນູຄັນໃຫຍ່ໄປ
ພິຈາລະນາຄີຣີບັນພົດໃຫຍ່ທັງ ໗ ໜ່ວຍ
ຈຶ່ງເຫັນຄີຣີບັນພົດສູງໃຫຍ່ຊື່ວ່າສຸວັນນະປັດສະຄີຣີ

[໑໑໕] ແລ້ວຈຶ່ງຂຶ້ນໄປສູ່ເສລະບັນພົດເຊິ່ງເປັນບ່ອນຢູ່ຂອງໝູ່ກິນນະຣະ
ແນມລົງໄປເບື້ອງລຸ່ມຕີນພູ ໄດ້ເຫັນພະຍາໄຮມີສີສັນງາມ
ສະເໝີເໝືອນເມກ ມີຍອຍໄຮຫ້ອຍຍ້ອຍຢູ່ ໘,໐໐໐ ຍອຍ

[໑໑໖] ຢູ່ໃຕ້ຕົ້ນໄຮນັ້ນ ເຂົາໄດ້ເຫັນພະຍາກຸນຊອນ
ງາມີຣັດສະໝີ ໖ ປະການ ຍາກທີ່ໃຜອື່ນຈະຂຶ້ນຂີ່ໄດ້
ພະຍາຊ້າງເຜືອກນັ້ນມີຊ້າງປະມານ ໘,໐໐໐ ເຊືອກ
ມີງາງອນງາມເໝືອນງອນລົດ
ແລ່ນໄລ່ປະຫານປັດຈາມິດໄວປານລົມພັດ
ແວດລ້ອມຮັກສາຢູ່

[໑໑໗] ອັນໜຶ່ງ ເຂົາໄດ້ເຫັນສະໂບກຂະຣະນີຢູ່ບໍ່ໄກ ໜ້າຣື່ນຣົມ
ມີທ່ານ້ຳສວຍງາມ ທັງມີນ້ຳຫຼາຍ ມີດອກປະທຸມບານສະພັ່ງ
ມີໝູ່ພະມອນ ເປື້ອນເຄົ້າເກສອນຢູ່ເປັນອາຈິນ
ເຊິ່ງເປັນສະຖານທີ່ທີ່ພະຍາຊ້າງນັ້ນລົງອາບນ້ຳ

[໑໑໗] ເມື່ອໄດ້ເຫັນຄວາມເປັນໄປ ການຍືນ
ແລະທີ່ນທາງທີ່ພະຍາຊ້າງນັ້ນຍ່າງໄປອາບນໍ້າແລ້ວ
ນາຍພານຜູ້ຊົ່ວຊ້າຖືກພຣະນາງສຸພັດທະຣາເທວີ
ຜູ້ຕົກຢູ່ໃນອຳນາດແຫ່ງຈິດຊົງໃຊ້ມາ ຈຶ່ງໄດ້ໄປຂຸດຂຸມ

[໑໑໙] ນາຍພານຜູ້ມີນິໄສເຮັດກຳຫຍາບຊ້າ ເມື່ອຂຸດຂຸມແລ້ວ
ຈຶ່ງປິດດ້ວຍແຜ່ນໄມ້ແປ້ນ ແລ້ວຢ່ອນຕົວລົງໄປ
ຈັບທະນູຍິງພະຍາຊ້າງທີ່ຍ່າງມາຂ້າງຂຸມດ້ວຍລູກສອນໃຫຍ່

[໑໘໐] ກໍແລພະຍາຊ້າງພໍຖືກຍິງກໍບັນລືຮ້ອງກ້ອງໂກນຈະນາດ
ຊ້າງທັງໝົດກໍພາກັນບັນລືສຽງອື້ອຶງ
ຕ່າງພາກັນແລ່ນໄປມາຮອບ ໆ ທັງ ໘ ທິດ
ເຮັດຫຍ້າແລະໄມ້ໃຫ້ມຸ່ນເປັນຝຸ່ນຜົງ

[໑໘໑] ພະຍາຊ້າງຈັບນາຍພານນັ້ນດ້ວຍໝາຍໃຈວ່າ ເຮົາຈັກຂ້າມັນ
ໄດ້ເຫັນຜ້າກາສາວະພັດອັນເປັນທຸງໄຊແຫ່ງລືສີທັງຫຼາຍ
ທັງ ໆ ທີ່ໄດ້ຮັບທຸກຂະເວທະນາ ກໍເກີດສັນຍາຂຶ້ນວ່າ
ບຸກຄົນຜູ້ຊົງທຸງໄຊແຫ່ງພຣະອະຣະຫັນ ສັດຕະບຸຣຸດບໍ່ຄວນຂ້າ

(ພະຍາຊ້າງກ່າວກັບນາຍພານນັ້ນວ່າ)

[໑໘໒] ຜູ້ໃດມີກິເລດດັ່ງນໍ້າຝາດຍັງບໍ່ໝົດໄປ
ປາສະຈາກທະມະແລະສັດຈະ
ແລ້ວນຸ່ງຫົ່ມຜ້າກາສາວະພັດ
ຜູ້ນັ້ນບໍ່ສົມຄວນຈະນຸ່ງຫົ່ມຜ້າກາສາວະພັດເລີຍ

[໑໘໓] ສ່ວນຜູ້ໃດຄາຍກິເລດດັ່ງນໍ້າຝາດໄດ້ແລ້ວ
ຕັ້ງໝັ້ນດ້ວຍດີໃນສິນທັງຫຼາຍ ປະກອບດ້ວຍທະມະແລະສັດຈະ
ຜູ້ນັ້ນແລສົມຄວນຈະນຸ່ງຫົ່ມຜ້າກາສາວະພັດ

(ພຣະສາດສະດາເມື່ອຊົງປະກາດຄວາມນັ້ນ ຈຶ່ງຕັດວ່າ)

[໑໘໔] ພະຍາຊ້າງເຖິງຖືກຍິງດ້ວຍລູກສອນໃຫຍ່ແລ້ວ
ກໍບໍ່ມີຈິດຄິດປະທຸດສະຮ້າຍໄດ້ກ່າວກັບນາຍພານວ່າ
ເພື່ອນຮັກ ເພື່ອນຕ້ອງການອັນໃດນໍ
ຍ້ອນອັນໃດ ເພື່ອນຈຶ່ງຂ້າເຮົາ ຫຼືວ່າໃຜໃຊ້ເພື່ອນມາ

(ນາຍພານກ່າວວ່າ)

[໑໘໕] ພະຍາຊ້າງຜູ້ຈະເລີນ ພຣະມະເຫສີຂອງພຣະເຈົ້າກາສີ
ພຣະນາງຊຶ່ງພະນາມວ່າສຸພັດທະຣາ
ໄດ້ຮັບການຍົກຍ້ອງບູຊາໃນຣາດຊະສະກຸນ
ກໍພຣະນາງໄດ້ຊຶ່ງສຸບິນນິມິດເຫັນທ່ານ ໄດ້ຕັດບອກຂ້າພະເຈົ້າ
ແລະໄດ້ຕັດກັບຂ້າພະເຈົ້າວ່າ ມີຄວາມຕ້ອງການງາທັງຄູ່ຂອງທ່ານ

(ພະຍາຊ້າງກ່າວວ່າ)

[໑໘໖] ຄວາມຈິງຄູ່ງາຂອງບິດາແລະຂອງປູ່ເຮົາທີ່ສວຍງາມມີເປັນຈຳນວນຫຼາຍ
ພຣະນາງຮູ້ດີ ແຕ່ພຣະຣາດຊະບຸດຕີມີນິໄສຊຶ່ງໂຫດຮ້າຍ
ເປັນຄົນພານ ຕ້ອງການທີ່ຈະຂ້າເຮົາ ຈຶ່ງໄດ້ຈອງເວນ

[໑໘໗] ລຸກຂຶ້ນເທີ້ນ ນາຍພານ ທ່ານຈົ່ງຈັບເລື່ອຍຕັດງາຄູ່ນີ້ກ່ອນທີ່ເຮົາຈະຕາຍ
ຈົ່ງຂາບທູນພຣະຣາດຊະບຸດຕີຜູ້ມີນິໄສຊຶ່ງໂກດພຣະອົງນັ້ນວ່າ
ພະຍາຊ້າງຖືກຂ້າພຣະອົງຂ້າຕາຍແລ້ວ
ເຊີນເທີ້ນ ງາຄູ່ນີ້ເປັນງາຂອງພະຍາຊ້າງນັ້ນ ຂ້ານ້ອຍ

(ພຣະສາດສະດາເມື່ອຊຶ່ງປະກາດຄວາມນັ້ນ ຈຶ່ງຕັດວ່າ)

[໑໘໘] ນາຍພານນັ້ນລຸກຂຶ້ນຈັບເລື່ອຍ
ຕັດງາທັງຄູ່ຂອງພະຍາຄົດຊະສານຕົວປະເສີດ
ແລ້ວຈຶ່ງນຳງາທັງຄູ່ເຊິ່ງມີຄວາມສວຍງາມຫາທີ່ປຽບບໍ່ໄດ້ໃນພື້ນປະຖະພີ
ຟ້າວຫຼີກໄປຈາກບ່ອນນັ້ນໂດຍໄວ

[໑໘໙] ຊ້າງເຫຼົ່ານັ້ນຖືກໄພຄຸກຄາມ ເປັນທຸກເພາະພະຍາຊ້າງຖືກຂ້າ
ຕ່າງພາກັນແລ່ນໄປມາທັງ ໘ ທິດ ບໍ່ເຫັນຄົນຜູ້ເປັນປັດຈາມິດຕໍ່ພະຍາຊ້າງ
ຈຶ່ງໄດ້ກັບມາຫາພະຍາຊ້າງ

[໑໙໐] ຊ້າງເຫຼົ່ານັ້ນຕ່າງຄ່ຳຄວນຮ້ອງໄຫ້ຢູ່ໃນບ່ອນນັ້ນ
ໂຮ່ຍຝຸ່ນລົງຫົວຂອງຕົນ ທັງໝົດໃຫ້ນາງຊ້າງຕົວປະເສີດກວ່າ
ຊ້າງທັງໝົດຍ່າງນຳໜ້າແລ້ວພາກັນກັບໄປສະຖານທີ່ຢູ່ຂອງຕົນ
[໑໙໑] ນາຍພານນັ້ນນຳງາທັງຄູ່ຂອງພະຍາຄົດຊະສານຕົວປະເສີດ
ເຊິ່ງມີຄວາມສວຍງາມຫາທີ່ປຽບບໍ່ໄດ້ໃນພື້ນປະຖະພີ

ສ່ອງຮັດສະໝີເປ່ງປັ່ງດັ່ງສາຍຮຸ້ງຄຳ ສະຫວ່າງສະໄຫວໄປທົ່ວເຂດປ່າ
ເຂົ້າໄປໃນເມືອງກາສີ ແລ້ວນ້ອມງາທັງຄູ່ເຂົ້າໄປຖວາຍພຣະຣາດຊະກັນຍາ
ຂາບທູນວ່າ ພະຍາຊ້າງຖືກຂ້າພຣະອົງຂ້າແລ້ວ
ງາຄູ່ນີ້ເປັນງາຂອງພະຍາຊ້າງນັ້ນ

[໑໓໘] ຍ້ອນທອດພຣະເນດເຫັນງາທັງຄູ່ຂອງພະຍາຄົດຊະສານຕົວປະເສີດ
ເຊິ່ງເປັນພັດສະດາທີ່ຮັກໃນຊາດປາງກ່ອນ
ພຣະຫະໄທຂອງພຣະນາງກໍໄດ້ແຕກທຳລາຍໃນສະຖານທີ່ນັ້ນນັ້ນເອງ
ພຣະນາງຜູ້ເປັນຄົນພານໄດ້ສະຫວັນນະຄົດຍ້ອນເຫດນັ້ນແລ້ວ

(ພຣະເຖຣະຜູ້ສັງຄາຍະນາພຣະທຳເມື່ອຈະພັນນາຄຸນຂອງພຣະທົດສະພົນ ຈຶ່ງໄດ້ກ່າວວ່າ)

[໑໓໓] ກໍພຣະບໍຣົມສາດສະດາຊົງບັນລຸສຳໂພທິຍານ
ຊົງມີອານຸພາບຫຼາຍ ໄດ້ຊົງແຍ້ມທ່າມກາງບໍລິສັດ
ພິກຂຸທັງຫຼາຍຜູ້ມີຈິດຫຼຸດພົ້ນດີແລ້ວພາກັນຂາບທູນວ່າ
ທຳມະດາພຣະພຸດທະເຈົ້າທັງຫຼາຍບໍ່ໄດ້ທຳການແຍ້ມໃຫ້ຜາກົດ
ໃນເພາະສິ່ງບໍ່ແມ່ນເຫດ

[໑໓໔] ທ່ານທັງຫຼາຍຈົ່ງເບິ່ງກຸມາຣີສາວເຊິ່ງຄອງຜ້າກາສາວະພັດ
ປະພຶດເປັນຜູ້ບໍ່ຄອງເຮືອນ
ພິກຂຸນີນັ້ນໄດ້ເປັນພຣະນາງຣາດຊະກັນຍາໃນຄັ້ງນັ້ນ
ສ່ວນຕະຖາຄົດໄດ້ເປັນພະຍາຊ້າງໃນຄັ້ງນັ້ນ

[໑໓໕] ນາຍພານຜູ້ນຳງາທັງຄູ່ຂອງພະຍາຄົດຊະສານຕົວປະເສີດ
ເຊິ່ງມີຄວາມສວຍງາມຫາທີ່ປຽບບໍ່ໄດ້ໃນພື້ນປະຖະພີ
ເຂົ້າໄປໃນເມືອງກາສີໃນການນັ້ນ ໄດ້ເປັນພຣະເທວະທັດ

[໑໓໖] ພຣະພຸດທະເຈົ້າຊົງປາສະຈາກຄວາມກະວົນກະວາຍ
ຄວາມໂສກແລະກິເລດດັ່ງລູກສອນ
ຕັດສະຣູ້ຍິ່ງດ້ວຍພຣະອົງເອງ
ໄດ້ຕັດສັດທັນຕະຊາດົກນີ້ອັນເປັນຂອງເກົ່າ
ທີ່ບໍ່ຮູ້ຈັກສາບສູນຕາບເທົ່າດວງອາທິດຍັງບໍ່ດັບ
ເຊິ່ງພຣະອົງໄດ້ທ່ອງທ່ຽວໄປຕະຫຼອດການລະນານ
ເປັນບຸຣະພະຈະຣິຍາທັງສູງແລະຕ່ຳວ່າ

[໑໓໗] ພິກຂຸທັງຫຼາຍ ໂດຍການນັ້ນ
ເຮົາຕະຖາຄົດໄດ້ມີຢູ່ທີ່ສະສັດທັນນັ້ນ
ເຮົາຕະຖາຄົດໄດ້ເປັນພະຍາຊ້າງຕົວປະເສີດໃນການນັ້ນ
ທ່ານທັງຫຼາຍຈົ່ງຈຳຊາດົກໄວ້ດ້ວຍປະການຢ່າງນີ້

**ສັດທັນຕະຊາດົກທີ ໔ ຈົບ**

## ໕. ສຳພະວະຊາດົກ (໕໑໕)
## ວ່າດ້ວຍສຳພະວະກຸມານ

(ພຣະຣາຊາຕັດຖາມບັນຫາກັບພາມສຸຈີຣະຕະວ່າ)

[໑໓໘] ທ່ານອາຈານສຸຈີຣະຕະ ຂ້າພະເຈົ້າບັນລຸເຖິງຣາດຊະສົມບັດ
ແລະຄວາມເປັນອະທິບໍດີແລ້ວ ແຕ່ຍັງປາຖະໜາ
ເພື່ອບັນລຸເຖິງຄວາມເປັນໃຫຍ່ແລະເພື່ອຊະນະທົ່ວທັງປະຖະພີນີ້

[໑໓໙] ໂດຍທຳ ບໍ່ແມ່ນໂດຍອະທຳ ຂ້າພະເຈົ້າບໍ່ພໍໃຈອະທຳ
ທ່ານອາຈານສຸຈີຣະຕະ ພຣະຣາຊາຕ້ອງປະພຶດທຳໃຫ້ເປັນກິດອັນສຳຄັນ

[໑໔໐] ທ່ານພາມ ຍ້ອນເຫດໃດ ເຮົາທັງຫຼາຍ
ຈະບໍ່ຖືກນິນທາໃນໂລກນີ້ ລະໄປແລ້ວກໍຈະບໍ່ຖືກຕິຕຽນ
ແລະເພິ່ງເຖິງຄວາມມີຍົດໃນເທວະດາແລະມະນຸດທັງຫຼາຍ

[໑໔໑] ທ່ານພາມ ຂ້າພະເຈົ້າປາຖະໜາຈະທຳຕາມອັດຖະແລະທຳ
ຂ້າພະເຈົ້າຖາມແລ້ວ ຂໍທ່ານຈົ່ງບອກອັດຖະແລະທຳນັ້ນດ້ວຍເທີ້ນ

(ສຸຈີຣະຕະພາມບໍ່ສາມາດຈະທູນຕອບບັນຫາໄດ້ ຈຶ່ງຂາບທູນວ່າ)

[໑໔໒] ຂໍເດຊະພຣະຂັດຕິຍະຣາດ
ພຣະອົງຊົງປາຖະໜາຈະທຳຕາມອັດຖະແລະທຳໃດ
ອັດຖະແລະທຳນັ້ນໃຜອື່ນນອກຈາກວິທຸຣະພາມ
ບໍ່ຄວນທີ່ຈະກ່າວຊີ້ແຈ່ງ

(ພຣະຣາຊາຊົງປະສົງຈະສົ່ງສຸຈີຣະຕະພາມໄປ ຈຶ່ງຕັດວ່າ)

[໑໔໓] ມາເທີ້ນ ທ່ານອາຈານສຸຈີຣະຕະ ຂ້າພະເຈົ້າຈະສົ່ງທ່ານໄປ

ທ່ານຈິ່ງໄປສູ່ສຳນັກວິທຸຣະພາມ ຈິ່ງນຳຄຳແຫ່ງນີ້ໄປນຳ
ເພິ່ງມອບຄຳແຫ່ງນີ້ເຮັດໃຫ້ເປັນເຄື່ອງບູຊາ
ສຳລັບຄຳສອນອັດຖະແລະທຳ

(ພຣະສາດສະດາເມື່ອຈະຊົງເຜີຍຄວາມນັ້ນ ຈິ່ງຕັດວ່າ)

[໑໘໔] ມະຫາພາມພາຣະທະວາຊະນັ້ນໄປເຖິງສຳນັກວິທຸຣະພາມແລ້ວ
ໄດ້ເຫັນວິທຸຣະພາມນັ້ນກຳລັງບໍຣິໂພກອາຫານຢູ່ໃນເຮືອນຂອງຕົນ

(ສຸຈິຣະຕະພາມຖືກຖາມເຖິງເຫດທີ່ມາ ຈິ່ງກ່າວວ່າ)

[໑໘໕] ເຮົາຖືກພຣະເຈົ້າໂກຣັບພະຍະຜູ້ຊົງຍົດສິ່ງມາເປັນທູດ
ພຣະເຈົ້າໂກຣັບພະຍະຍຸທິດຖິລະໄດ້ຕັດແນວນີ້ວ່າ
ທ່ານເພິ່ງຖາມອັດຖະແລະທຳ ວິທຸຣະເພື່ອນ ເຮົາຖາມແລ້ວ
ຂໍທ່ານຈິ່ງບອກອັດຖະແລະທຳນັ້ນດ້ວຍເທີ້ນ

(ວິທຸຣະພາມກ່າວວ່າ)

[໑໘໖] ສະຫາຍພາມ ເຮົາເກີດຄວາມຂວນຂວາຍຂຶ້ນວ່າ
ຈັກປິດກັ້ນແມ່ນ້ຳຄົງຄາ ກໍບໍ່ອາດຈະປິດກັ້ນແມ່ນ້ຳໃຫຍ່ນັ້ນໄດ້
ຍ້ອນເຫດນັ້ນ ຈັກມີໂອກາດໄດ້ແນວໃດ

[໑໘໗] ເຮົາຖືກທ່ານຖາມເຖິງອັດຖະແລະທຳ ກໍບໍ່ສາມາດຈະບອກທ່ານໄດ້
ແຕ່ພັດທະຣະກາຣະບຸດຂອງເຮົາ ເປັນລູກໃນໄສ້ເກີດແຕ່ຕົວເຮົາແທ້ ໆ
ທ່ານຈິ່ງໄປຖາມອັດຖະແລະທຳກັບເຂົາເທີ້ນ ພາມ

(ພຣະສາດສະດາເມື່ອຊົງປະກາດຄວາມນັ້ນ ຈິ່ງຕັດວ່າ)

[໑໘໘] ມະຫາພາມພາຣະທະວາຊະນັ້ນໄດ້ໄປເຖິງສຳນັກພັດທະຣະກາຣະແລ້ວ
ໄດ້ເຫັນເຂົານັ່ງຢູ່ໃນເຮືອນຂອງຕົນ

(ສຸຈິຣະຕະພາມຈິ່ງກ່າວວ່າ)

[໑໘໙] ເຮົາຖືກພຣະເຈົ້າໂກຣັບພະຍະຜູ້ຊົງຍົດສິ່ງມາເປັນທູດ
ພຣະເຈົ້າໂກຣັບພະຍະຍຸທິດຖິລະໄດ້ຕັດແນວນີ້ວ່າ
ທ່ານເພິ່ງຖາມອັດຖະແລະທຳ ພັດທະຣະກາຣະຫຼານຮັກ
ເຈົ້າຈິ່ງບອກອັດຖະແລະທຳນັ້ນແກ່ລຸງເທີ້ນ

(ພັດທະຣະກາຣະພາມບໍ່ສາມາດຈະແກ້ບັນຫາໄດ້ ຈຶ່ງສົ່ງເຂົາໄປສູ່ສຳນັກນ້ອງຊາຍຊື່ສັນໄຊກຸມານວ່າ)

[໑໕໐] ຂ້າພະເຈົ້າເໝືອນຄົນລະຖິ້ມຫາບຊີ້ນຕິດຕາມເຫັຍຢູ່
ເຖິງຖືກທ່ານຖາມເຖິງອັດຖະແລະທຳ ກໍບໍ່ອາດຈະບອກແກ່ທ່ານໄດ້

[໑໕໑] ທ່ານພາມສຸຈິຣະຕະ ເຮົາມີນ້ອງຊາຍຊື່ວ່າສັນໄຊ
ເຂົາເປັນນ້ອງຊາຍຂອງເຮົາ
ທ່ານຈົ່ງໄປຖາມອັດຖະແລະທຳກັບເຂົາເທີ້ນ

(ພຣະສາດສະດາຊົງປະກາດຄວາມນັ້ນວ່າ)

[໑໕໒] ມະຫາພາມພາຣະທະວາຊະນັ້ນໄປເຖິງສຳນັກສັນໄຊແລ້ວ
ໄດ້ເຫັນເຂົານັ່ງຢູ່ໃນເຮືອນຂອງຕົນຈຶ່ງກ່າວວ່າ

[໑໕໓] ເຮົາຖືກພຣະເຈົ້າໂກຣັບພະຍະຜູ້ຊົງຍົດສົ່ງມາເປັນທູດ
ພຣະເຈົ້າໂກຣັບພະຍະຍຸທິດຖິລະໄດ້ຕັດແນວນີ້ວ່າ
ທ່ານເພິ່ງຖາມອັດຖະແລະທຳ ສັນໄຊຫຼານຮັກ ລຸງຖາມແລ້ວ
ຂໍເຈົ້າຈົ່ງບອກອັດຖະແລະທຳນັ້ນດ້ວຍເທີ້ນ

(ສັນໄຊກຸມານກ່າວວ່າ)

[໑໕໔] ທ່ານພາມສຸຈິຣະຕະ ພະຍາມັດຈຸຣາດຍ່ອມກືນກິນຂ້າພະເຈົ້າທຸກເມື່ອ
ທັງເວລາຄ່ຳແລະເວລາເຊົ້າ ຂ້າພະເຈົ້າຖືກທ່ານຖາມອັດຖະແລະທຳ
ກໍບໍ່ອາດຈະບອກແກ່ທ່ານໄດ້

[໑໕໕] ທ່ານພາມສຸຈິຣະຕະ ຂ້າພະເຈົ້າມີນ້ອງຊາຍຊື່ວ່າສຳພະວະ
ເຂົາເປັນນ້ອງຊາຍຂອງຂ້າພະເຈົ້າ
ຂໍທ່ານຈົ່ງໄປຖາມອັດຖະແລະທຳກັບເຂົາເທີ້ນ

(ສຸຈິຣະຕະພາມກ່າວວ່າ)

[໑໕໖] ທ່ານຜູ້ຈະເລີນທັງຫຼາຍ ໜ້າອັດສະຈັນນໍ
ບັນຫາທຳນີ້ພວກເຮົາຍັງບໍ່ພໍໃຈ
ບິດາແລະບຸດທັງ ໓ ຄົນນັ້ນ
ກໍຍັງບໍ່ມີປັນຍາຈະຢັ່ງຮູ້ເຖິງບັນຫາທຳນີ້ເລີຍ

[໑໕໗] ທ່ານທັງ ໓ ຄົນຖືກຖາມເຖິງອັດຖະແລະທຳນັ້ນກໍບໍ່ອາດຈະບອກໄດ້
ເຫດໃດນໍ ເດັກຖືກຖາມເຖິງອັດຖະແລະທຳຈະເພິ່ງຮູ້ໄດ້

(ສັນໄຊກຸມານໄດ້ຟັງດັ່ງນັ້ນ ຈຶ່ງສັນເສີນສຳພະອະກຸມານວ່າ)

[໑໕໘] ທ່ານຍັງບໍ່ໄດ້ຖາມສຳພະອະກຸມານກ່ອນແລ້ວ
ຢ່າເຂົ້າໃຈເຂົາ ວ່າເປັນເດັກ
ພາມ ທ່ານຖາມສຳພະອະກຸມານແລ້ວເພິ່ງຮູ້ອັດຖະແລະທຳໄດ້

[໑໕໙] ດວງຈັນປາສະຈາກມົນທົນ ໂຄຈອນໄປໃນອາກາດສະຫາດ
ຍ່ອມສະຫວ່າງສະໄຫວກວ່າໝູ່ດາວທັງໝົດໃນໂລກດ້ວຍຣັດສະໝີແມ່ນສັນໃດ

[໑໖໐] ສຳພະອະກຸມານເຖິງຍັງເປັນເດັກກໍສັນນັ້ນ ຍ້ອນປະກອບດ້ວຍປັນຍາ
ທ່ານຍັງບໍ່ໄດ້ຖາມສຳພະອະກຸມານກ່ອນແລ້ວຢ່າເຂົ້າໃຈເຂົາວ່າເປັນເດັກ
ພາມ ທ່ານຖາມສຳພະອະກຸມານແລ້ວເພິ່ງຮູ້ອັດຖະແລະທຳໄດ້

[໑໖໑] ທ່ານພາມ ເດືອນຈິດຕະມາດແຫ່ງຄິມຫັນຕະລະດູ
ຍ່ອມງາມຍິ່ງກວ່າເດືອນອື່ນ ໆ
ດ້ວຍຕົ້ນໄມ້ແລະດອກໄມ້ແມ່ນສັນໃດ

[໑໖໒] ສຳພະອະກຸມານເຖິງຍັງເປັນເດັກກໍສັນນັ້ນ ຍ້ອນປະກອບດ້ວຍປັນຍາ
ທ່ານຍັງບໍ່ໄດ້ຖາມສຳພະອະກຸມານກ່ອນແລ້ວຢ່າເຂົ້າໃຈເຂົາວ່າເປັນເດັກ
ພາມ ທ່ານຖາມສຳພະອະກຸມານແລ້ວເພິ່ງຮູ້ອັດຖະແລະທຳໄດ້

[໑໖໓] ທ່ານພາມ ຫິມະວັນຕະບັນພົດຊື່ຄັນທະມາດ
ເດຍລະດາດໄປດ້ວຍຕົ້ນໄມ້ນານາພັນ ເປັນບ່ອນຢູ່ແຫ່ງໝູ່ມະຫາພູດ
ຍ່ອມສະຫວ່າງສະໄຫວແລະຕະຫຼົບອົບອວນໄປທົ່ວທິດ
ດ້ວຍທິບພະໂອສົດແມ່ນສັນໃດ

[໑໖໔] ສຳພະອະກຸມານເຖິງຍັງເປັນເດັກກໍສັນນັ້ນ ຍ້ອນປະກອບດ້ວຍປັນຍາ
ທ່ານຍັງບໍ່ໄດ້ຖາມສຳພະອະກຸມານກ່ອນແລ້ວຢ່າເຂົ້າໃຈວ່າເປັນເດັກ
ພາມ ທ່ານຖາມສຳພະອະກຸມານແລ້ວເພິ່ງຮູ້ອັດຖະແລະທຳໄດ້

[໑໖໕] ທ່ານພາມ ໄຟປ່າມີແປວໄຟເປັນຊໍ່ ຮຸ່ງເຮືອງ
ລຸກເປັນແປວຢູ່ກໍໄມ້ໃນປ່າ ບໍ່ອີ່ມຕໍ່ເຊື້ອເພີງ ມີທາງດຳ

[໑໖໖] ກິນໄມ້ເປັນອາຫານ ມີຄວັນເປັນທຸງ
ໄໝ້ລາມຈົນເຖິງຍອດເຂດປ່າ ມີເຊື້ອໄຟພຸ່ງພໍ່
ໂຊດຊ່ວງຢູ່ເທິງຈອມພູໃນເວລາກາງຄືນສັນໃດ

[໑໖໗] ສຳພະວະກຸມານເຖິງຍັງເປັນເດັກກໍສັນນັ້ນ ຍ້ອນປະກອບດ້ວຍປັນຍາ
ທ່ານຍັງບໍ່ໄດ້ຖາມສຳພະວະກຸມານກ່ອນແລ້ວຢ່າເຂົ້າໃຈວ່າເປັນເດັກ
ພາມ ທ່ານຖາມສຳພະວະກຸມານແລ້ວເພິ່ງຮູ້ອັດຖະແລະທຳໄດ້

[໑໖໘] ມ້າດີຈະຮູ້ໄດ້ຍ້ອນຄວາມວ່ອງໄວ
ງົວພະລິພັດຈະຮູ້ໄດ້ໃນເມື່ອມີພາຣະທີ່ຈະຕ້ອງລາກໄປ
ແມ່ງົວນົມຈະຮູ້ໄດ້ເພາະນ້ຳນົມ ແລະບັນດິດຈະຮູ້ໄດ້ເມື່ອເຈຣະຈາສັນໃດ

[໑໖໙] ສຳພະວະກຸມານເຖິງຍັງເປັນເດັກກໍສັນນັ້ນ ຍ້ອນປະກອບດ້ວຍປັນຍາ
ທ່ານຍັງບໍ່ໄດ້ຖາມສຳພະວະກຸມານກ່ອນແລ້ວຢ່າເຂົ້າໃຈເຂົາວ່າເປັນເດັກ
ພາມ ທ່ານຖາມສຳພະວະກຸມານແລ້ວເພິ່ງຮູ້ອັດຖະແລະທຳໄດ້

(ພຣະສາດສະດາເມື່ອຊົງເປີດເຜີຍຄວາມນັ້ນ ຈຶ່ງຕັດວ່າ)

[໑໗໐] ມະຫາພາມພາຣະທະວາຊະນັ້ນໄປເຖິງສຳນັກສຳພະວະກຸມານແລ້ວ
ໄດ້ເຫັນເຂົາກຳລັງຫຼິ້ນຢູ່ນອກບ້ານ

(ສຸຈີຣະຕະພາມໄດ້ຖາມບັນຫາວ່າ)

[໑໗໑] ເຮົາຖືກພຣະເຈົ້າໂກຣັບພະຍະຜູ້ຊົງຍົດສົ່ງມາເປັນທູດ
ພຣະເຈົ້າໂກຣັບພະຍະຍຸທິດຖິລະໄດ້ຕັດແນວນີ້ວ່າ
ທ່ານເພິ່ງຖາມອັດຖະແລະທຳ ທ້າວສຳພະວະນ້ອຍ ລຸງຖາມເຈົ້າແລ້ວ
ຂໍເຈົ້າຈົ່ງບອກອັດຖະແລະທຳນັ້ນດ້ວຍເທີ້ນ

(ສຳພະວະກຸມານກ່າວວ່າ)

[໑໗໒] ເອົາເທີ້ນ ຂ້າພະເຈົ້າຈັກບອກລຸງເວົ້າຢ່າງຄົນທີ່ສະຫຼາດ
ກໍພຣະຣາຊາຍ່ອມຈະຊົງຮູ້ບັນຫານັ້ນໄດ້
ແຕ່ຈະຊົງເຮັດຫຼືບໍ່ກໍ່ນັ້ນ

(ແລະເມື່ອຈະບອກບັນຫາຈຶ່ງກ່າວວ່າ)

[໑໗໓] ທ່ານພາມສຸຈິຣະຕະ ໃຜ ໆ ຖືກພຣະຣາຊາຕັດຖາມແລ້ວ
ເພິ່ງຂາບທູນຣາດຊະກິດທີ່ຈະເຮັດໃນວັນນີ້ວ່າ ເພິ່ງເຮັດໃນມື້ອື່ນນີ້
ຂໍພຣະເຈົ້າຍຸທິດຖິລະຢ່າຊົງເຊື່ອຟັງຢັບຢັ້ງຢູ່ເລີຍໃນເມື່ອປະໂຫຍດເກີດຂຶ້ນ

[໑໗໔] ທ່ານພາມສຸຈິຣະຕະ ໃຜ ໆ ຖືກພຣະຣາຊາຕັດຖາມແລ້ວ
ເພິ່ງຂາບທູນບັນຫາທີ່ເປັນໄປພາຍໃນທໍ່ນັ້ນ
ບໍ່ເພິ່ງໃຫ້ຊົງດໍາເນີນໄປສູ່ຫົນທາງທີ່ຊົ່ວດັ່ງຄົນຫຼົງຫາຄວາມຄິດບໍ່ໄດ້

[໑໗໕] ພຣະຣາຊາບໍ່ຄວນລືມຕົນ ບໍ່ຄວນປະພຶດອະທໍາ
ບໍ່ຄວນຢັ່ງລົງໄປໃນລັດທິທີ່ຜິດ ບໍ່ເພິ່ງປະກອບໃນສິ່ງອັນບໍ່ເປັນປະໂຫຍດ

[໑໗໖] ຂັດຕິຍະຣາຊາພຣະອົງໃດຊົງຮູ້ຈັກເຮັດເຫດເຫຼົ່ານີ້
ຂັດຕິຍະຣາຊາພຣະອົງນັ້ນຍ່ອມຊົງຈະເລີນທຸກເມື່ອເໝືອນດວງຈັນຂ້າງຂຶ້ນ

[໑໗໗] ພຣະອົງຍ່ອມຊົງເປັນທີ່ຮັກແຫ່ງໝູ່ພຣະຍາດ
ແລະຊົງຮຸ່ງເຮືອງໃນໝູ່ມິດ ຊົງມີພຣະປັຊາ
ເມື່ອພຣະວໍຣະກາຍແຕກທໍາລາຍໄປ ຈະຊົງເຂົ້າເຖິງໂລກສະຫວັນ

**ສໍາພະວະຊາດົກທີ ໕ ຈົບ**

## ໖. ມະຫາກະປິຊາດົກ (໕໑໖)
## ວ່າດ້ວຍພະຍາວານອນ

(ພຣະສາດສະດາຊົງປະກາດເນື້ອຄວາມນີ້ວ່າ)

[໑໗໘] ໄດ້ມີພຣະຣາຊາແຫ່ງຊົນຊາວກາສີ ຊົງຜະດຸງຣັດໃຫ້ຈະເລີນ
ໃນເມືອງພາຣານະສີ ແວດລ້ອມດ້ວຍມິດແລະອໍາມາດ
ໄດ້ສະເດັດໄປສູ່ມິຄາຊິນະອຸທະຍານ

[໑໗໙] ໃນບ່ອນນັ້ນ ໄດ້ທອດພຣະເນດເຫັນພາມເປັນໂຣກເຮື້ອນ
ຂາວພາວເປັນຈຸດ ໆ ແລະກາກກ້ຽນ
ມີຊີ້ນຫຼຸດອອກຈາກປາກບາດເຊັ່ນກັບດອກຈານ
ມີຮ່າງກາຍຜ່າຍຜອມ ສະພັ່ງໄປດ້ວຍເສັ້ນເອັນ

[໑໘໐] ເມື່ອທອດພຣະເນດເຫັນຄົນຕົກຍາກ

ເຖິງຄວາມລຳບາກໜ້າສົງສານຍິ່ງ
ພຣະຣາຊາຊົງຫວາດຫວັ່ນພຣະຫະໄທ
ຈຶ່ງຕັດຖາມວ່າ ເຈົ້າເປັນຍັກປະເພດໃດ

[໑໗໑] ມືແລະຕີນຂອງເຈົ້າກໍຕ່າງ ຫົວຍິ່ງຕ່າງກວ່ານັ້ນ
ເນື້ອຕົວຂອງເຈົ້າກໍຕ່າງພ້ອຍ ແລະເຕັມໄປດ້ວຍກາກກ້ຽນ

[໑໗໒] ຫຼັງຂອງເຈົ້າເປັນປຸ່ມເປັນປົມເໝືອນກັບເຄືອເຂົາທີ່ຄົດກົມ
ອະໄວຍະວະຂອງເຈົ້າກໍເໝືອນກັບເຄືອເຂົາທີ່ມີຂໍ້ດຳ
ເຮົາຍັງບໍ່ເຄີຍເຫັນອັນໃດອື່ນເປັນແນວນີ້

[໑໗໓] ເຈົ້າມີຕີນງິກງໍ ໜ້າຫວາດສຽວ ມີຮ່າງກາຍຜ່າຍຜອມ
ສະພັ່ງໄປດ້ວຍເສັ້ນເອັນ ເບິ່ງຫິວກະຫາຍ ອຶດໂຊ
ເຈົ້າມາຈາກບ່ອນໃດ ແລະຈະໄປໃສ?

[໑໗໔] ເຈົ້າມີຮູບຮ່າງອັບປະລັກ ເບິ່ງໜ້າກຽດໜ້າຊັງ
ຜິວພັນ ກໍຊາມ ເບິ່ງເປັນຕາຢ້ານ
ມານດາບິດາຜູ້ໃຫ້ກຳເນີດຂອງເຈົ້າຄົງບໍ່ປາຖະໜາທີ່ຈະເຫັນເຈົ້າ

[໑໗໕] ໃນຊາດປາງກ່ອນເຈົ້າໄດ້ເຮັດກຳອັນໃດໄວ້
ໄດ້ຂ້າຄົນທີ່ບໍ່ຄວນຂ້າບໍ
ຫຼືເພາະເຮັດກຳອັນໂຫດຮ້າຍທາຣຸນແນວໃດໄວ້
ເຈົ້າຈຶ່ງປະສົບທຸກແນວນີ້

(ຕໍ່ແຕ່ນັ້ນໄປ ພາມຈຶ່ງກ່າວວ່າ)

[໑໗໖] ເຊີນສະດັບເທີ້ນ ຂ້ານ້ອຍ ຂ້າພຣະອົງຈັກຂາບທູນ
ໃຫ້ພຣະອົງຊົງຮູ້ເອົາຢ່າງຄົນສະຫຼາດ
ເພາະບັນດິດທັງຫຼາຍໃນໂລກນີ້ສັນເສີນຄົນເວົ້າຄວາມແທ້

[໑໗໗] ເມື່ອຂ້າພຣະອົງຜູ້ດຽວທ່ຽວສະແຫວງຫາງົວ
ໄດ້ຫຼົງລ່ວງເລີຍເຂົ້າໄປໃນປ່າປຽວທີ່ແຫ້ງແລ້ງກັນດານ
ງຽບສະຫງັດ ເຊິ່ງເປັນບ່ອນຢູ່ອາໄສແຫ່ງຊ້າງນານາຊະນິດ

[໑໗໘] ຂ້າພຣະອົງໄດ້ຫຼົງທາງເຂົ້າໄປໃນປ່າທຶບ

ເຊິ່ງເປັນທີ່ສັນຈອນໄປມາແຫ່ງເນື້ອຮ້າຍ
ມີຄວາມຫິວກະຫາຍ ໄດ້ທ່ອງທ່ຽວໄປໃນປ່ານັ້ນຕະຫຼອດ ໆ ວັນ

[໑໗໙] ໃນທີ່ປ່ານັ້ນ ຂ້າພຣະອົງໄດ້ເຫັນຕົ້ນໝາກພັບຕົ້ນໜຶ່ງ
ເຊິ່ງຢູ່ບໍ່ຫຼາຍ ມີງ່າຊີ້ອອກໄປສູ່ປາກເຫວ
ມີໜ່ວຍດົກ ຂ້າພຣະອົງປາຖະໜາຈະກິນ

[໑໘໐] ຂ້າພຣະອົງກິນໝາກທີ່ລົມພັດຫຼົ່ນ
ຂ້າພຣະອົງພໍໃຈໝາກພັບເຫຼົ່ານັ້ນຫຼາຍ ແຕ່ຍັງບໍ່ອີ່ມ
ຈຶ່ງປີນຂຶ້ນໄປເທິງຕົ້ນດ້ວຍຄິດວ່າ ຈັກກິນໃຫ້ສະບາຍເທິງຕົ້ນນັ້ນ

[໑໘໑] ຂ້າພຣະອົງກິນໜ່ວຍໜຶ່ງແລ້ວປາຖະໜາໜ່ວຍທີ ໒ ຕໍ່ໄປ
ແຕ່ນັ້ນງ່າມັນໄດ້ຫັກເໝືອນຖືກຂວານຕັດ

[໑໘໒] ຂ້າພຣະອົງນັ້ນພ້ອມທັງງ່າໄມ້ ມີຕີນຊີ້ຟ້າ
ຫົວປັກລົງຕົກໄປໃນຮ່ອມພູ ເຊິ່ງບໍ່ມີທີ່ຈະຢຶດໜ່ຽວ

[໑໘໓] ຮ່ອມພູນັ້ນເປັນເຫວເລິກ
ນອນທອດອາໄລຢູ່ໃນຮ່ອມພູນັ້ນ ບໍ່ນ້ອຍກວ່າ ໑໐ ຣາຕີ

[໑໘໔] ຕໍ່ມາ ວານອນຕົວໜຶ່ງມີຫາງຄ້າຍຫາງງົວ
ທ່ອງທ່ຽວໄປມາຕາມຮ່ອມພູເປັນປະຈຳ
ໄຕ່ໄປຕາມງ່າໄມ້ກັດກິນໝາກໄມ້ຢູ່ ໄດ້ມາເຖິງສະຖານທີ່ນັ້ນ

[໑໘໕] ມັນເຫັນຂ້າພຣະອົງມີຮ່າງກາຍຜອມເຫຼືອງ
ໄດ້ມີຄວາມກາຣຸນແກ່ຂ້າພຣະອົງ ຖາມໄຖ່ວ່າ
ທ່ານຜູ້ຈະເລີນ ທ່ານຊື່ແນວໃດ ເປັນຫຍັງຈຶ່ງມາທົນທຸກຢູ່ບ່ອນນີ້ແນວນີ້

[໑໘໖] ເປັນມະນຸດຫຼືອະມະນຸດ ຈົ່ງແນະນຳຕົວໃຫ້ຂ້າພະເຈົ້າຮູ້ແດ່
ຂ້າພຣະອົງໄດ້ປະນົມອັນຊະລີແລ້ວກ່າວແກ່ມັນແນວນີ້ວ່າ

[໑໘໗] ຂ້າພະເຈົ້າເປັນມະນຸດປະສົບຄວາມພິນາດ
ຂ້າພະເຈົ້າບໍ່ມີທາງທີ່ຈະໄປຈາກບ່ອນນີ້
ເພາະສະນັ້ນ ຂ້າພະເຈົ້າຈຶ່ງຂໍບອກໃຫ້ທ່ານຮູ້
ຂໍທ່ານຈົ່ງມີຄວາມຈະເລີນ ຂໍທ່ານຈົ່ງເປັນບ່ອນເພິ່ງຂອງຂ້າພະເຈົ້າດ້ວຍ

[໑໙໘] ວານອນຜູ້ກ້າຫານທ່ຽວໄປຫາກ້ອນສີລາທີ່ມີນ້ຳໜັກຢູ່ພູເຂົາ
ຜູກເຄືອເຂົາທີ່ກ້ອນສີລາແລ້ວ ໄດ້ກ່າວຄຳນີ້ວ່າ

[໑໙໙] ມາເທີ້ນ ມາຂຶ້ນເກາະຫຼັງຂ້າພະເຈົ້າ
ທ່ານຈົ່ງໃຊ້ແຂນທັງ ໔ ຂ້າງກອດຄໍຂ້າພະເຈົ້າໄວ້
ຂ້າພະເຈົ້າຈະໃຊ້ກຳລັງຊ່ອຍທ່ານຂຶ້ນໄປຈາກຮ່ອມພູ

[໒໐໐] ຂ້າພຣະອົງສະດັບຄຳນັ້ນແລ້ວ
ຈຶ່ງຂຶ້ນເກາະຫຼັງພະຍາວານອນຜູ້ມີສີຣິມີຮ່າງກາຍສູງໃຫຍ່
ແລ້ວໃຊ້ແຂນທັງ ໔ ກອດຄໍໄວ້

[໒໐໑] ພະຍາວານອນຜູ້ມີເດດ ມີກຳລັງຕົນນັ້ນ ໄດ້ຮັບຄວາມລຳບາກ
ພະຍາຍາມໂດດພາຂ້າພຣະອົງຂຶ້ນ
ຈາກຮ່ອມພູນັ້ນດ້ວຍຄວາມຍາກ

[໒໐໒] ເມື່ອນຳຂ້າພຣະອົງຂຶ້ນມາໄດ້ແລ້ວ
ພະຍາວານອນຜູ້ເປັນບັນດິດ ກ້າຫານ ໄດ້ກ່າວຄຳນີ້ວ່າ
ເພື່ອນຮັກ ທ່ານໂຜດຮັກສາຄວາມປອດໄພໃຫ້ຂ້າພະເຈົ້າດ້ວຍເທີ້ນ
ຂ້າພະເຈົ້າຈັກຂໍພັກຜ່ອນບຶດໜຶ່ງ

[໒໐໓] ສິງ ເສືອໂຄ່ງ ເສືອເຫຼືອງ ໝີ ໝາປ່າ
ແລະເສືອດາວເພິ່ງບຽດບຽນຂ້າພະເຈົ້າຜູ້ຫຼັບຢູ່
ຂໍທ່ານຈົ່ງຫ້າມກັນໄວ້ປ້ອງກັນໄພໃຫ້ແກ່ເຮົາດ້ວຍ

[໒໐໔] ພະຍາວານອນນັ້ນເມື່ອໃຫ້ຂ້າພຣະອົງເປັນຜູ້ປ້ອງກັນແລ້ວ
ຈຶ່ງຫຼັບໄປບຶດໜຶ່ງ
ຄັ້ງນັ້ນ ຂ້າພຣະອົງໄດ້ມີຄວາມຄິດຊົ່ວຊ້າ
ໂດຍບໍ່ທັນຄິດໃຫ້ຮອບຄອບວ່າ

[໒໐໕] ວານອນນີ້ກໍເປັນອາຫານຂອງພວກມະນຸດ
ເຊັ່ນດຽວກັບເນື້ອອື່ນ ໆ ໃນປ່າຄືກັນ
ຖ້າຈັ່ງຊັ້ນແລ້ວ ເຮົາກໍ່ຫິວຢູ່ຄວນຂ້າວານອນນີ້ກິນດີກວ່າ

[໒໐໖] ອັນໜຶ່ງ ເຮົາບໍຣິໂພກອິ່ມແລ້ວຈັກຖືເອົາຊີ້ນເປັນສະບຽງເດີນທາງ
ຈັກຂ້າມທາງກັນດານ ແລະເຮົາຈັກມີສະບຽງເດີນທາງ

[໔໐໗] ທັນໃດນັ້ນ ຂ້າພຣະອົງຈຶ່ງຈັບກ້ອນຫີນແລ້ວທຸບໃສ່ຫົວພະຍາວານອນ
ແຕ່ການປະຫານຂອງຂ້າພຣະອົງ
ຜູ້ມີຮ່າງກາຍເມື່ອຍລ່າຍ້ອນອົດອາຫານມາຫຼາຍມື້ ມີກຳລັງບໍ່ພໍ

[໔໐໘] ກໍພະຍາວານອນນັ້ນໄດ້ລຸກຂຶ້ນໂດຍໄວ
ຍ້ອນຖືກກ້ອນຫີນທຸບຫົວ
ມີຕົວອາບໄປດ້ວຍເລືອດ ຮ້ອງໄຫ້ເສຍໃຈ
ແນມເບິ່ງຂ້າພຣະອົງດ້ວຍດວງຕາຜິດຫວັງ
ເຊິ່ງເຕັມໄປດ້ວຍນ້ຳຕາ ພ້ອມກ່າວວ່າ

[໔໐໙] ທ່ານຢ່າເຮັດຂ້າພະເຈົ້າເລີຍ ຂໍທ່ານຈົ່ງມີຄວາມຈະເລີນ
ທ່ານຢ່າໄດ້ກະທຳກຳອັນບໍ່ສົມຄວນເຊັ່ນນີ້
ອັນໜຶ່ງ ທ່ານໄດ້ຊື່ວ່າມີອາຍຸຍືນຍາວ ຄວນຈະຫ້າມປາມຄົນເຫຼົ່າອື່ນ

[໔໑໐] ທ່ານຄົນຜູ້ກະທຳກຳທີ່ຄົນອື່ນເຮັດໄດ້ຍາກໜ້າເວທະນາ
ເຮົາຊ່ອຍທ່ານຂຶ້ນຈາກເຫວເລິກທີ່ຊຸຂະຍາກທີ່ຈະຂຶ້ນໄດ້

[໔໑໑] ແຕ່ທ່ານກັບເຮັດຕົວເໝືອນເຮົານຳມາຈາກປະຣະໂລກ
ຍັງສຳຄັນເຮົາວ່າເປັນຄົນຄວນປະທຸດສະຮ້າຍ
ທ່ານນັ້ນເປັນຄົນຊົ່ວ ມີສັນດານຊົ່ວຊ້າ ຈຶ່ງຄິດແຕ່ເຫດທີ່ຊົ່ວ

[໔໑໒] ໂອ ທ່ານຜູ້ບໍ່ຕັ້ງຢູ່ໃນທຳ
ຂໍທ່ານຢ່າປະສົບເວທະນາອັນເຜັດຮ້ອນເລີຍ
ຂໍບາບທຳຢ່າໄດ້ຂ້າທ່ານເໝືອນຂີໄຜ່ຂ້າຕົ້ນໄຜ່ເລີຍ

[໔໑໓] ທ່ານຜູ້ມີບາບກຳ ບໍ່ສັງລວມ ເຮົາບໍ່ໄວ້ໃຈທ່ານ
ມາເທີ້ນ ທ່ານຈົ່ງຕາມຫຼັງເຮົາໄປໃກ້ ໆ ພໍເຫັນກັນ

[໔໑໔] ເມື່ອທ່ານພົ້ນແລ້ວຈາກສັດຮ້າຍ ເຖິງຖິ່ນມະນຸດແລ້ວ
ທ່ານຜູ້ບໍ່ຕັ້ງຢູ່ໃນທຳ ເຮົາຈະປ່ອຍທ່ານໄປ
ທ່ານຈົ່ງໄປທາງນັ້ນໄດ້ຕາມສະບາຍເທີ້ນ

[໔໑໕] ເມື່ອກ່າວແນວນີ້ແລ້ວ
ວານອນຜູ້ມີປົກກະຕິທ່ອງທ່ຽວໄປຕາມຊຸນເຂົາ
ໄດ້ລ້າງຫົວທີ່ເປື້ອນເລືອດ
ເຊັດນ້ຳຕາແລ້ວໂດດຈາກທີ່ນັ້ນຂຶ້ນໄປສູ່ພູເຂົາສູງ

[໔໑໖] ຂ້າພຣະອົງນັ້ນຖືກວານອນນັ້ນປ້ອຍດ່າ
ຖືກຄວາມກະວົນກະວາຍບຽດບຽນ
ມີກາຍຮ້ອນຮົນ ຈຶ່ງລົງໄປສູ່ສາຍນ້ຳເພື່ອຈະດື່ມ

[໔໑໗] ທ້ອງນ້ຳທັງປວງຜາກົດແກ່ຂ້າພຣະອົງ
ເໝືອນເດືອດພົດຍ້ອນໄຟ
ປົນດ້ວຍເລືອດຊ້ຳເລືອດຊ້ຳໜອງ

[໔໑໘] ຢາດນ້ຳມີປະມານພຽງໃດຕົກຕ້ອງກາຍຂອງຂ້າພຣະອົງ
ຫົວຝີມີຂະໜາດເທົ່າໜ່ວຍໝາກຕູມເຄິ່ງໜ່ວຍກໍຜຸດຂຶ້ນມີປະມານພຽງນັ້ນ

[໔໑໙] ຝີເຫຼົ່ານັ້ນແຕກແລ້ວ ນ້ຳເລືອດແລະນ້ຳໜອງ
ໄຫຼອອກຈາກຮ່າງກາຍຂອງຂ້າພຣະອົງປຽບດັ່ງຊາກສົບ
ຂ້າພຣະອົງຈະໄປທາງໃດ
ຈະເປັນໝູ່ບ້ານແລະນິຄົມທັງຫຼາຍກໍຕາມ

[໔໔໐] ພວກມະນຸດທັງຍິງທັງຊາຍຖືກກິ່ນເໝັນລົບກວນ
ຕ່າງຖືໄມ້ຄ້ອນ ຫ້າມກັນຂ້າພຣະອົງວ່າເຈົ້າຢ່າມາທາງນີ້

[໔໔໑] ບັດນີ້ຂ້າພຣະອົງສະເຫວີຍກຳຂອງຕົນ
ທີ່ຕົນເອງກະທຳໄວ້ບໍ່ດີໃນປາງກ່ອນ
ຂ້າພຣະອົງມີທຸກເຊັ່ນນີ້ ຢູ່ຢ່າງນີ້ຕະຫຼອດ ໗ ປີ

[໔໔໔] ຍ້ອນເຫດນັ້ນ ຂ້າພຣະອົງຈຶ່ງຂໍຂາບທູນໃຫ້ພຣະອົງຊົງຮູ້
ຂໍຄວາມຈະເລີນຈົ່ງມີແກ່ທ່ານທັງຫຼາຍເທົ່າທີ່ມາປະຊຸມກັນ ໃນບ່ອນນີ້
ຂໍພຣະອົງຢ່າຊົງເປັນຜູ້ປະທຸດສະຮ້າຍມິດເລີຍ
ຍ້ອນຄົນປະທຸດສະຮ້າຍມິດຈັດເປັນຄົນຊົ່ວ

[໔໔໓] ບຸກຄົນໃດໃນໂລກນີ້ຍ່ອມປະທຸດສະຮ້າຍມິດ
ບຸກຄົນນັ້ນຍ່ອມເປັນໂຣກເຮື້ອນ ໂຣກກາກ ກົ່ງນ
ຄົນຜູ້ມີປົກກະຕິປະທຸດສະຮ້າຍມິດເມື່ອຕາຍໄປຍ່ອມເຂົ້າເຖິງນະຮົກ

**ມະຫາກະປິຊາດົກທີ ໖ ຈົບ**

# ໗. ທະກະຣັກຂະສະຊາດົກ (໕໑໗)
# ວ່າດ້ວຍຜີເສື້ອນ້ຳ

(ເພຣີປະຣິພາຊິກາກ່າວບັນຫາຂອງຣາກາສົດວ່າ)

[໘໘໔] ຖ້າວ່າມະຫາບໍພິດທັງ ໗ ພຣະອົງກຳລັງລອຍເຮືອຢູ່ໃນຫ້ວງນ້ຳ
ຜີເສື້ອນ້ຳຜູ້ສະແຫວງຫາມະນຸດເປັນການບູຊາຢຶດເຮືອໄວ້
ມະຫາບໍພິດຈະຊົງສະລະໃຫ້ຜີເສື້ອນ້ຳຕາມລຳດັບໄດ້ແນວໃດ?

(ພຣະຣາຊາສະດັບດັ່ງນັ້ນແລ້ວ ຈຶ່ງຕັດວ່າ)

[໘໘໕] ຂ້າພະເຈົ້າຈະໃຫ້ພຣະມານດາເປັນອັນດັບ ໑ ກ່ອນ
ໃຫ້ພຣະມະເຫສີແລ້ວໃຫ້ອະນຸຊາ
ຕໍ່ຈາກນັ້ນຈະໃຫ້ພຣະສະຫາຍ
ແລ້ວຈະໃຫ້ປຸໂຣຫິດພາມເປັນອັນດັບທີ ໕
ຈະໃຫ້ຕົນເອງເປັນອັນດັບທີ ໖ ແຕ່ຈະບໍ່ໃຫ້ມະໂຫສົດບັນດິດ

(ເພຣີປະຣິພາຊິກາກ່າວຄຸນຂອງມານດາວ່າ)

[໘໘໖] ພຣະຣາດຊະຊົນນີຂອງມະຫາບໍພິດ ຊົງບຳຣຸງລ້ຽງ ໃຫ້ກຳເນີດ
ແລະຊົງເອັນດູຊ່ອຍເຫຼືອຕະຫຼອດການລະນານ
ເມື່ອມະຫາບໍພິດຖືກສັບພິພາມປະທຸດສະຮ້າຍ
ພຣະນາງຊົງເປັນບັນດິດຄິດເຫັນປະໂຫຍດ
ຈຶ່ງຊົງທຳສິ່ງອື່ນແທນມະຫາບໍພິດ
ປິດເປື້ອງມະຫາບໍພິດຈາກການຖືກລອບປົງພະຊົນ

[໘໘໗] ພຣະຣາດຊະມານດານັ້ນຊົງປະທານພະຊົນຊີບ
ຊົງຖືພາພຣະໂອຣົດເຊັ່ນນັ້ນ
ຍ້ອນໂທດອັນໃດ ມະຫາບໍພິດຈຶ່ງຈະປະທານໃຫ້ຜີເສື້ອນ້ຳ

(ພຣະຣາຊາຕັດໂທດຂອງພຣະມານດາວ່າ)

[໘໘໘] ພຣະມານດາຂອງຂ້າພະເຈົ້າປະດັບເຄື່ອງອະລັງການທີ່ບໍ່ຄວນປະດັບ
ເໝືອນເດັກສາວກະຊິກກະຊີ້ກັບຄົນເຝົ້າປະຕູ
ແລະຄົນຊັ້ນຕ່ຳເກີນຂອບເຂດ

[໔໔໙] ອັນໜຶ່ງ ຊົງສົ່ງທູດໄປສູ່ພຣະຣາຊາຝ່າຍອື່ນສາເອງ
ຍ້ອນໂທດນັ້ນ ຂ້າພະເຈົ້າຈະເພິ່ງໃຫ້ພຣະມານດາແກ່ຣາກສິດ

(ເພຣີປະຣິພາຊິກາກ່າວຄຸນຂອງພຣະນາງນັນທາເທວີວ່າ)

[໔໕໐] ພຣະນາງນັນທາເທວີຜູ້ປະເສີດກວ່າໝູ່ນາຣີ
ມີພຣະເສົາວະນີໜ້າຮັກ ຊົງອະນຸວັດຕາມມະຫາບໍພິດ ເປັນຜູ້ຊົງສິນ
ບໍ່ໄດ້ຊົງເຫີນຫ່າງມະຫາບໍພິດ ປຽບດັ່ງພຣະສາຍາໂດຍສ່ວນດຽວ

[໔໕໑] ປາສະຈາກຄວາມໂກດຮ້າຍ ຊົງມີບຸນ
ສະຫຼາດ ຊົງເລັງເຫັນປະໂຫຍດ
ຍ້ອນໂທດອັນໃດ ມະຫາບໍພິດຈະປະທານມະເຫສີໃຫ້ຜີເສື້ອນ້ຳ

(ພຣະຣາຊາຕັດໂທດຂອງນາງນັນທາເທວີວ່າ)

[໔໕໒] ພຣະນາງນັນທາເທວີນັ້ນມັກຂໍຊັບທີ່ບໍ່ຄວນຂໍກັບຂ້າພະເຈົ້າ
ຜູ້ເຖິງຄວາມຣ່າເຣີງຍິນດີ ຜູ້ຕົກຢູ່ໃນອຳນາດສິ່ງທີ່ບໍ່ແມ່ນປະໂຫຍດ
ເພື່ອໂອຣົດແລະທິດາຂອງຕົນ

[໔໕໓] ຂ້າພະເຈົ້ານັ້ນມີຄວາມກຳໜັດ ຈຶ່ງຍອມໃຫ້ຊັບ
ທັງມີຄ່າຫຼາຍແລະມີຄ່າໜ້ອຍເປັນຈຳນວນຫຼາຍ
ເມື່ອຍອມໃຫ້ຊັບຍາກທີ່ຈະສະລະໄດ້ແລ້ວ ພາຍຫຼັງຈຶ່ງເສົ້າໂສກເສຍໃຈ
ຍ້ອນໂທດນັ້ນແລ ຂ້າພະເຈົ້າຈະເພິ່ງໃຫ້ມະເຫສີແກ່ຜີເສື້ອນ້ຳ

(ເພຣີປະຣິພາຊິກາທູນຖາມຕໍ່ໄປວ່າ)

[໔໕໔] ພຣະກະນິດຖະພາດາພຣະອົງໃດຊົງຍັງຊົນນະບົດໃຫ້ຈະເລີນ
ເຊີນສະເດັດມະຫາບໍພິດກັບພຣະຣາດຊະມົນທຽນແລະຊົງຄອບງຳ
ນຳຊັບຈາກຣາດຊະສົມບັດອື່ນມາຖວາຍເປັນຈຳນວນຫຼາຍ

[໔໕໕] ພຣະກະນິດຖະພາດາພຣະອົງນັ້ນປະເສີດກວ່ານາຍຂະມັງທະນູທັງຫຼາຍ
ຊົງກ້າຫານ ມີພຣະປັຊາສຽບແຫຼມ
ຍ້ອນໂທດອັນໃດ ມະຫາບໍພິດຈຶ່ງຈະປະທານໃຫ້ແກ່ຜີເສື້ອນ້ຳນໍ

(ພຣະຣາຊາຕັດໂທດຂອງພຣະກະນິດຖະພາດາວ່າ)

[໔໓໖] ອະນຸຊາໃດຂອງຂ້າພະເຈົ້າຜູ້ຍັງຊົນນະບົດໃຫ້ຈະເລີນ
ນຳຂ້າພະເຈົ້າກັບພຣະຣາດຊະມົນທຽນແລະຄອບງຳ
ນຳຊັບຈາກຣາດຊະສົມບັດອື່ນມາໃຫ້ເປັນຈຳນວນຫຼາຍ

[໔໓໗] ອະນຸຊານັ້ນປະເສີດກວ່ານາຍຂະມັງທະນູທັງຫຼາຍ
ກ້າຫານ ແລະມີປັນຍາສຽບແຫຼມ ຍັງເປັນເດັກ
ແຕ່ດູໝິ່ນຂ້າພະເຈົ້າວ່າ ພຣະຣາຊາພຣະອົງນີ້ຊົງເປັນສຸກເພາະເຮົາ

[໔໓໘] ພຣະແມ່ເຈົ້າ ເຂົາບໍ່ມາແມ່ນສູ່ທີ່ບຳຣຸງຂອງຂ້າພະເຈົ້າເໝືອນກ່ອນ
ຍ້ອນໂທດນັ້ນ ຂ້າພະເຈົ້າຈະເພິ່ງໃຫ້ອະນຸຊາແກ່ຜີເສື້ອນ້ຳ

(ເພຣີປະຣິພາຊິກາບອກຄຸນຂອງພຣະສະຫາຍນັ້ນວ່າ)

[໔໓໙] ມະຫາບໍພິດແລະທະນຸເສຂະກຸມານ
ທັງ ໔ ກຳເນີດຣາຕີດຽວກັນ
ທັງ ໔ ເກີດໃນພຣະນະຄອນນີ້ ເປັນຊາວປັນຈາລະນະຄອນ
ເປັນສະຫາຍກັນມີໄວສະເໝີກັນ

[໔໕໐] ກຸມານນັ້ນຕິດຕາມມະຫາບໍພິດທ່ອງທ່ຽວໄປ
ຮ່ວມທຸກຮ່ວມສຸກກັບມະຫາບໍພິດ
ມີຄວາມຂະຫຍັນຂວນຂວາຍໃນຣາດຊະກິດທຸກຢ່າງຂອງມະຫາບໍພິດ
ທັງກາງເວັນແລະກາງຄືນ
ຍ້ອນໂທດອັນໃດ ມະຫາບໍພິດຈຶ່ງຈະປະທານສະຫາຍໃຫ້ຜີເສື້ອນ້ຳເສຍນໍ

(ພຣະຣາຊາຕັດໂທດຂອງພຣະສະຫາຍວ່າ)

[໔໕໑] ພຣະແມ່ເຈົ້າ ທະນຸເສຂະກຸມານນີ້ຫົວສຽງດັງຄືຂ້າພະເຈົ້າ
ເມື່ອທ່ອງທ່ຽວໄປກັບຂ້າພະເຈົ້າ
ແມ່ນວັນນີ້ເຂົາກໍຍັງຫົວສຽງດັງບໍ່ຈົບງາມແບບນັ້ນ

[໔໕໔] ພຣະແມ່ເຈົ້າ ຂ້າພະເຈົ້າແມ່ນກຳລັງເປີກສາ
ກັບພຣະເທວີຢູ່ໃນທີ່ເປັນຫ້ອງໃຫຍ່
ທະນຸເສຂະກຸມານຍັງບໍ່ທັນບອກກ່າວ
ຍັງບໍ່ທັນໃຫ້ຂ້າພະເຈົ້າຮູ້ຕົວກ່ອນ ກໍພວດພາດເຂົ້າໄປ

[໘໘໓] ເຂົາໄດ້ຈັງຫວະ ໄດ້ໂອກາດ
ຍ້ອນໂທດນັ້ນ ຂ້າພະເຈົ້າຈຶ່ງຈະໃຫ້ສະຫາຍຜູ້ບໍ່ມີຄວາມລະອາຍ
ບໍ່ເອື້ອເຟື້ອແກ່ຜີເສື້ອນ້ຳ

(ເພຣີປະຣິພາຊິກາບອກຄຸນຂອງເກວັດຕະປຸໂຣຫິດວ່າ)

[໘໘໔] ທ່ານເກວັດຕະປຸໂຣຫິດເປັນຜູ້ສະຫຼາດໃນນິມິດທຸກຢ່າງ
ຮູ້ສຳນຽງສຽງຮ້ອງຂອງສັດທັງປວງ ຊ່ຽວຊານໃນຄັມພີພຣະເວດ
ຊ່ຽວຊານໃນເລື້ອງລາງບອກເຫດໃນຄວາມຝັນ
ຊຳນານໃນການຫາເລີກຍາມ ໃນການເຄື່ອນພົນແລະເຂົ້າປະຊິດ

[໘໘໕] ສາມາດຮູ້ໂທດແລະຄຸນທັງໃນພາກພື້ນດິນແລະອາກາດ
ເປັນຜູ້ສະຫຼາດໃນຄອງແຫ່ງນັກຂະສັດ
ຍ້ອນໂທດອັນໃດ ມະຫາບໍພິດຈຶ່ງຈະປະທານປຸໂຣຫິດພາມ
ໃຫ້ແກ່ຜີເສື້ອນ້ຳສານໍ

(ພຣະຣາຊາຕັດໂທດຂອງປຸໂຣຫິດພາມວ່າ)

[໘໘໖] ພຣະແມ່ເຈົ້າ ແມ່ນທ່ານກາງບໍລິສັດ
ປຸໂຣຫິດພາມກໍມືນຕາຈ້ອງແນມຂ້າພະເຈົ້າ
ຍ້ອນເຫດນັ້ນ ຂ້າພະເຈົ້າຈະໃຫ້ປຸໂຣຫິດຜູ້ຫຍາບຊ້າ
ມັກເລືອດຕາແນມເບິ່ງຂ້າພະເຈົ້າແກ່ຜີເສື້ອນ້ຳສາ

(ເພຣີປະຣິພາຊິກາທູນຖາມຕໍ່ໄປອີກວ່າ)

[໘໘໗] ພຣະອົງຊົງຄອບຄອງແຜ່ນດິນມີມະຫາສະມຸດເປັນຂອບເຂດ
ມີສາຄອນລ້ອມຮອບຄືດັ່ງຕຸ້ມຫູຊົງມີໝູ່ອຳມາດແວດລ້ອມ

[໘໘໘] ຊົງມີແຄວັ້ນກວ້າງໃຫຍ່ໄພສານ
ມີມະຫາສະມຸດທັງ ໔ ເປັນຂອບເຂດ
ຊົງພິຊິດສົງຄາມ ມີພະລານຸພາບຫຼາຍ
ຊົງເປັນເອກກະຣາດເໜືອພື້ນປະຖະພີ
ມະຫາບໍພິດຊົງມີພຣະອິດສະຣິຍະຍົດອັນໄພບູນ

[໘໘໙] ຊົງມີເຫຼົ່ານາຣີຈາກຊົນນະບົດຕ່າງ ໆ ເຖິງ ໑໖,໐໐໐ ນາງ

ລ້ອມປະດັບດ້ວຍແກ້ວມຸກດາແລະຕຸ້ມຫູແກ້ວມະນີ
ງາມປຽບໄດ້ກັບເທບກັນຍາ

[໔໕໐] ຂໍຖວາຍພຣະພອນພຣະບໍຣົມມະກະສັດ
ຊີວິດຍືນຍາວທີ່ພຽບພ້ອມດ້ວຍອົງສົມບັດທຸກຢ່າງນີ້
ນັກປາດທັງຫຼາຍກ່າວວ່າ ເປັນທີ່ຮັກຂອງຄົນທີ່ມີຄວາມສຸກ
ຜູ້ພຽບພ້ອມດ້ວຍສົມບັດ ທີ່ໜ້າປາຖະໜາທຸກຢ່າງ

[໔໕໑] ເມື່ອເປັນເຊັ່ນນັ້ນ ເລື້ອງອັນໃດຫຼືເຫດເຫດໃດ ມະຫາບໍພິດຈຶ່ງຊົງສະລະ
ພະຊົນຊີບທີ່ສະລະໄດ້ຍາກ ຄອຍນຳປ້ອງກັນບັນດິດນໍ

(ພຣະຣາຊາຕັດບອກຄຸນຂອງມະໂຫສົດບັນດິດວ່າ)

[໔໕໒] ພຣະແມ່ເຈົ້າ ເພາະທ່ານມະໂຫສົດແມ່ນມາສູ່ເງື້ອມມືຂ້າພະເຈົ້າແລ້ວ
ຂ້າພະເຈົ້າຍັງບໍ່ຮູ້ເຖິງຄວາມຊົ່ວຂອງທ່ານປາດແມ່ນທໍ່ພຽງອະນູໜຶ່ງ

[໔໕໓] ເຖິງແມ່ນວ່າຂ້າພະເຈົ້າຈະຕ້ອງຕາຍໄປກ່ອນໃນການໃດ ໆ ກໍຕາມ
ທ່ານມະໂຫສົດກໍຈະເພິ່ງຊ່ອຍລູກແລະຫຼານຂອງຂ້າພະເຈົ້າໃຫ້ມີຄວາມສຸກ

[໔໕໔] ທ່ານມະໂຫສົດເຫັນແຈ້ງຊັດປະໂຫຍດທຸກປະການ
ທັງອະນາຄົດແລະປັດຈຸບັນ ຂ້າພະເຈົ້າຈະບໍ່ຍອມໃຫ້ທ່ານມະໂຫສົດ
ຜູ້ບໍ່ເຄີຍທຳຄວາມຜິດແກ່ຜີເສື້ອນ້ຳ

(ເພຣີປະຣິພາຊິກາເຊີນຊາວພຣະນະຄອນມາກ່າວວ່າ)

[໔໕໕] ຊາວປັນຈາລະທັງຫຼາຍ
ທ່ານທັງຫຼາຍຈົ່ງສະດັບພຣະດຳຣັດຂອງພຣະເຈົ້າຈູລະນີນີ້
ພຣະອົງຊົງສະລະພະຊົນຊີບທີ່ສະລະໄດ້ຍາກ
ຄອຍນຳປ້ອງກັນບັນດິດ

[໔໕໖] ພຣະເຈົ້າປັນຈາລະຊົງສະລະຊີວິດຂອງພຣະຊົນນີ ພຣະມະເຫສີ
ພຣະກະນິດຖະພາດາ ພຣະສະຫາຍ ແລະພາມປຸໂຣຫິດ
ແລະແມ່ນຂອງພຣະອົງເອງລວມເປັນ ໖ ຄົນ

[໔໕໗] ປັນຍາໃຫ້ສຳເລັດປະໂຫຍດໃຫຍ່ຫຼວງ
ເປັນທຳມະຊາດລະອຽດອ່ອນ ເປັນເຫດໃຫ້ເກີດແຕ່ສິ່ງທີ່ດີ

ຍ່ອມເປັນໄປເພື່ອປະໂຫຍດເກື້ອກູນໃນປັດຈຸບັນ
ແລະເພື່ອຄວາມສຸກໃນສຳປະຣາຍະພົບດ້ວຍປະການຢ່າງນີ້

**ທະກະຣັກຂະສະຊາດົກທີ ໗ ຈົບ**

## ໙. ປັນທະຣະກະນາຄະຣາຊະຊາດົກ (໕໑໙)
## ວ່າດ້ວຍປັນທະຣະກະນາຄະຣາດ

(ປັນທະຣະກະນາຄະຣາດຄ່ຳຄວນວ່າ)

[໘໕໙] ໄພທີ່ຕົນເອງກໍ່ຂຶ້ນຍ່ອມຕິດຕາມຄົນຂາດປັນຍາ
ເວົ້າໄປທົ່ວທິບ ບໍ່ປົກປິດຄວາມຮູ້
ຂາດຄວາມຣະມັດຣະວັງ ບໍ່ໄຕ່ຕອງໃຫ້ຮອບຄອບ
ເໝືອນພະຍາຄຸດໄລ່ຈັບປັນທະຣະກະນາຄະຣາດ

[໘໕໙] ນໍຣະຊົນໃດພໍໃຈບອກມົນທີ່ລີ້ລັບ
ທີ່ຕົນຄວນຈະປົກປິດຮັກສາ ຍ້ອນຄວາມຈົ໋າ
ໄພຍ່ອມຕິດຕາມເຂົາຜູ້ເປີດເຜີຍມົນທັນທີ
ເໝືອນພະຍາຄຸດໄລ່ຈັບປັນທະຣະກະນາຄະຣາດ

[໘໖໐] ມິດທຽມບໍ່ຄວນຈະຮູ້ເນື້ອຄວາມສຳຄັນເຊິ່ງເປັນຄວາມລັບ
ແຕ່ມິດແທ້ຜູ້ບໍ່ຮູ້ຫຼືຮູ້ສິ່ງທີ່ບໍ່ເປັນປະໂຫຍດ
ກໍບໍ່ຄວນຈະຮູ້ຄວາມລັບນັ້ນ

[໘໖໑] ເຮົາໄວ້ວາງໃຈອະເຈລະກະ (ຊີເປືອຍ) ວ່າ ຜູ້ນີ້ເປັນສະມະນະ
ຊາວໂລກນັບຖື ອົບຮົມຕົນດີແລ້ວ
ໄດ້ເປີດເຜີຍບອກຄວາມລັບແກ່ເຂົາ
ຈຶ່ງລ່ວງເລີຍປະໂຫຍດ ຮ້ອງໄຫ້ຢູ່ຢ່າງລຳເຄັນ

[໘໖໒] ພະຍາຄຸດຜູ້ປະເສີດ ສຳລັບເຂົາ
ຂ້າພະເຈົ້າບໍ່ອາດຈະຣະວັງວາຈາທີ່ເຊື່ອງລັບຄວນປິດໄວ້ນັ້ນ
ຍ້ອນເຫດນັ້ນ ໄພຈາກຝ່າຍເຂົາຈຶ່ງມາເຖິງຂ້າພະເຈົ້າ
ຂ້າພະເຈົ້າຈຶ່ງລ່ວງເລີຍປະໂຫຍດ ຮ້ອງໄຫ້ຢູ່ຢ່າງລຳເຄັນ

[໘໖໓] ນໍຣະຊົນໃດສຳຄັນຜູ້ນີ້ວ່າ ເປັນຄົນມີໃຈດີ

ບອກຄວາມລັບກັບຄົນທີ່ເກີດໃນສະກຸນຕ່ຳຊາມ
ຍ້ອນຄວາມຮັກ ຄວາມຊັງ ຫຼືຍ້ອນຄວາມເກງກົວ
ນໍຣະຊົນນັ້ນເປັນຄົນໂງ່ ຕ້ອງຍ່ອຍຍັບໂດຍບໍ່ຕ້ອງສົງໄສ

[໘໙໔] ນໍຣະຊົນໃດມີປົກກະຕິເວົ້ານອກເລື້ອງ
ນັບເນື່ອງເຂົ້າໃນພວກອະສັດຕະບຸຣຸດ
ມັກເວົ້າໃນທີ່ປະຊຸມຊົນ
ນໍຣະຊົນນັ້ນປາດກ່າວວ່າ ຄົນມີພິດຮ້າຍ ປາກກ້າ
ຄວນຣະມັດຣະວັງຄົນເຊັ່ນນັ້ນໃຫ້ຫ່າງໄກ

[໘໙໕] ຂ້າພະເຈົ້າໄດ້ລະຖິ້ມສິ່ງທີ່ໜ້າປາຖະໜາທັງໝົດໄປແລ້ວ
ຄື ເຂົ້າ ນ້ຳ ຜ້າແຄວັນກາສີ ຈຸນແກ່ນຈັນແດງ
ຍິງທີ່ຈະເລີນໃຈ ພວງດອກໄມ້ ແລະເຄື່ອງຊະໂລມທາຜິວ
ຂ້າແດ່ພະຍາຄຸດ ຂ້າພະເຈົ້າຂໍມອບຊີວິດແກ່ທ່ານ

(ພະຍາຄຸດກ່າວຄາຖາຕຳໜິປັນທະຣະກະນາຄະຣາດວ່າ)

[໘໙໖] ບັນດາເຮົາທັງ ໓ ໃນບ່ອນນີ້ ໃຜນໍຄວນຖືກຕຳໜິ
ນາຄະຣາດ ເຮົາທັງຫຼາຍເປັນສັດມີຊີວິດໃນໂລກນີ້
ຄື ສະມະນະ ຄຸດ ຫຼືວ່າທ່ານກັນແນ່ຄວນຖືກຕຳໜິ
ປັນທະຣະກະນາຄະຣາດ ທ່ານຖືກຂ້າພະເຈົ້າຈັບຍ້ອນເຫດໃດ

(ປັນທະຣະກະນາຄະຣາດຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໘໙໗] ອະເຈລະກະນັ້ນເປັນຜູ້ທີ່ຂ້າພະເຈົ້າຍ້ອງຍໍວ່າ ເປັນສະມະນະ
ເປັນທີ່ຮັກຂອງຂ້າພະເຈົ້າ ແລະຂ້າພະເຈົ້າຍ້ອງຍໍດ້ວຍໃຈຈິງ
ຂ້າພະເຈົ້າຈຶ່ງໄດ້ເປີດເຜີຍບອກຄວາມລັບແກ່ເຂົາ
ຈຶ່ງໄດ້ລ່ວງເລີຍປະໂຫຍດ ຮ້ອງໄຫ້ຢູ່ຢ່າງລຳເຄັນ

(ພະຍາຄຸດກ່າວວ່າ)

[໘໙໘] ແທ້ຈິງ ສັດຊື່ວ່າຈະບໍ່ຕາຍບໍ່ມີໃນແຜ່ນດິນ
ປັນຍາມີຢູ່ຫຼາຍຢ່າງ ບຸກຄົນບໍ່ຄວນນິນທາ
ນໍຣະຊົນໃນໂລກນີ້ຍ່ອມບັນລຸຄຸນວິເສດທີ່ຍັງບໍ່ໄດ້ບັນລຸ
ໄດ້ດ້ວຍສັດຈະ ໑ ທຳມະ ໑ ປັນຍາ ໑ ທະມະ ໑

[໔໗໙]	ມານດາບິດານັບວ່າເປັນຜູ້ປະເສີດແຫ່ງເຜົ່າພັນ
ບຸກຄົນທີ ໑ ຜູ້ຊ່ອຍເຫຼືອເຂົາບໍ່ມີ
ເມື່ອຣະແວງສົງໄສວ່າ ຄວາມລັບທີ່ເປີກສາໄວ້ຈະແຕກ
ກໍບໍ່ເພິ່ງບອກຄວາມລັບທີ່ສໍາຄັນ ແມ່ນແກ່ມານດາບິດາເຫຼົ່ານັ້ນ

[໔໘໐]	ເມື່ອສົງໄສວ່າ ມັນຈະແຕກທໍາລາຍ
ບັນດິດບໍ່ເພິ່ງບອກຄວາມລັບທີ່ສໍາຄັນແມ່ນແກ່ມານດາບິດາ
ເອື້ອຍ ນ້ອງສາວ ອ້າຍ ນ້ອງຊາຍ
ເພື່ອນສະຫາຍ ຫຼືຍາດພວກພ້ອງຂອງຕົນ

[໔໘໑]	ເຖິງພັນລະຍາຈະຍັງສາວເວົ້າຈາໄພເລາະມ່ວນ
ເຖິງພ້ອມດ້ວຍບຸດທິດາ ມີຮູບຮ່າງສວຍງາມ
ມີກຽດຕິຍົດຊື່ສຽງ ມີໝູ່ຍາດແວດລ້ອມ
ເວົ້າອ້ອນສາມີ ເມື່ອສົງໄສວ່າ ຄວາມລັບທີ່ເປີກສາໄວ້ຈະແຕກ
ບັນດິດບໍ່ເພິ່ງບອກຄວາມລັບທີ່ສໍາຄັນແມ່ນແກ່ນາງ

[໔໘໒]	ບັນດິດບໍ່ເພິ່ງເປີດເຜີຍຄວາມລັບ
ເພິ່ງຮັກສາຄວາມລັບນັ້ນໄວ້ເໝືອນຮັກສາຂຸມຊັບ
ຍ້ອນວ່າຄວາມລັບບຸກຄົນຮູ້ຢູ່ບໍ່ເປີດເຜີຍໄດ້ເປັນການດີ

[໔໘໓]	ບັນດິດບໍ່ຄວນບອກຄວາມລັບແກ່ສະຕີ ໑ ສັດຕູ ໑
ຄົນທີ່ໃຊ້ອາມິດລໍ້ ໑ ຄົນຜູ້ລ້ວງຄວາມລັບ ໑

[໔໘໔]	ຄົນຜູ້ຮູ້ຄວາມລັບທີ່ຜູ້ອື່ນບໍ່ຮູ້
ຍ້ອນຢ້ານຄວາມລັບທີ່ເປີກສາຫາຣືກັນໄວ້ຈະແຕກ
ຍ່ອມອົດກັ້ນໄວ້ດັ່ງບຸກຄົນຜູ້ເປັນທາດເຂົາ

[໔໘໕]	ຄົນມີປະມານເທົ່າໃດລ່ວງຮູ້ຄວາມລັບທີ່ເຂົາເປີກສາກັນ
ຄົນມີປະມານເທົ່ານັ້ນເປັນບຸກຄົນທີ່ໜ້າຢ້ານກົວຂອງເຂົາ
ເພາະສະນັ້ນ ບຸກຄົນບໍ່ຄວນເປີດເຜີຍຄວາມລັບ

[໔໘໖]	ເວລາກາງເວັນຄວນເວົ້າຄວາມລັບໃນບ່ອນສະຫງັດ
ເວລາກາງຄືນບໍ່ຄວນເວົ້າດັງເກີນໄປ
ຍ້ອນເຫດວ່າຄົນຈອບຟັງໄດ້ຍິນຄວາມລັບທີ່ເປີກສາກັນແລ້ວ
ຄວາມລັບນັ້ນຈະເຖິງການກະຈາຍໄປໂດຍໄວ

[໔໗໗]　ນະຄອນໃຫຍ່ທີ່ສ້າງດ້ວຍເຫຼັກ ບໍ່ມີປະຕູ
ມີໂຮງເຮືອນລ້ວນສ້າງດ້ວຍເຫຼັກ
ມີຄູຄອງຂຸດໄວ້ອ້ອມຮອບ ຍ່ອມຜາກົດແມ່ນສັນໃດ
ແມ່ນຜູ້ມີຄວາມຄິດອັນລີ້ລັບໃນໂລກນີ້ກໍຜາກົດແກ່ເຮົາສັນນັ້ນ

[໔໗໘]　ນາຄະຣາດຜູ້ມີລີ້ນສອງແສກ ນໍຣະຊິນເຫຼົ່າໃດປົກປິດຄວາມຄິດໄວ້
ບໍ່ເວົ້າໂລເລ ໝັ້ນຄົງຢູ່ໃນປະໂຫຍດຂອງຕົນ
ສັດຕູທັງຫຼາຍຍ່ອມຫຼີກຫ່າງໄກຈາກນໍຣະຊິນເຫຼົ່ານັ້ນ
ເໝືອນຄົນຮັກຊີວິດຫຼີກຫ່າງໄກຈາກໝູ່ສັດອະສໍຣະພິດສະນັ້ນ

(ເມື່ອພະຍາຄຸດກ່າວແນວນັ້ນແລ້ວ ປັນທະຣະກະນາຄະຣາດຈຶ່ງກ່າວວ່າ)

[໔໗໙]　ອະເຈລະກະລະຖິ້ມບ້ານເຮືອນແລ້ວບວດ ມີຫົວໂລ້ນ
ປະພຶດເປັນຄົນເປືອຍຍ້ອນເຫດແຫ່ງການຫາກິນ
ຍ້ອນຂ້າພະເຈົ້າເປີດເຜີຍຄວາມລັບກັບເຂົາ
ຈຶ່ງໄດ້ເສື່ອມຈາກອັດຖະແລະທຳ

[໔໘໐]　ພະຍາຄຸດ ບຸກຄົນເຮັດແນວໃດ
ມີສີນແນວໃດ ພ່ຳເພັງຂໍ້ວັດອັນໃດ
ປະພຶດລະຄວາມຍຶດໝັ້ນວ່າເປັນຂອງເຮົາແນວໃດ
ຈຶ່ງຈະເປັນສະມະນະໄດ້
ອັນໜຶ່ງ ສະມະນະເຮັດແນວໃດຈຶ່ງຈະເຂົ້າເຖິງແດນສະຫວັນໄດ້

(ພະຍາຄຸດກ່າວວ່າ)

[໔໘໑]　ບຸກຄົນປະກອບດ້ວຍຫິຣິ ດ້ວຍຄວາມອົດກັ້ນ
ດ້ວຍການເຝິກຕົນ ບໍ່ໂກດ ລະຄຳສໍ່ສຽດ
ປະພຶດລະຄວາມຍຶດໝັ້ນວ່າເປັນຂອງເຮົາສາ
ຈຶ່ງຈະເປັນສະມະນະໄດ້
ສະມະນະເຮັດແນວນີ້ຈຶ່ງຈະເຂົ້າເຖິງແດນສະຫວັນໄດ້

(ປັນທະຣະກະນາຄະຣາດເມື່ອຈະຂໍຊີວິດ ຈຶ່ງກ່າວວ່າ)

[໔໘໔]　ມານດາກອດສຳຜັດບຸດອ່ອນເຊິ່ງເກີດແຕ່ຕົນ
ແຜ່ຊ່ານເຮືອນຮ່າງທຸກສ່ວນສັດປົກປ້ອງສັນໃດ

ທ່ານຜູ້ເປັນຈອມແຫ່ງນົກ ທ່ານຈຶ່ງຜາກົດແກ່ຂ້າພະເຈົ້າແມ່ນສັນນັ້ນ
ເໝືອນມານດາອີດູບຸດ

(ພະຍາຄຸດເມື່ອຈະໃຫ້ຊີວິດແກ່ປັນທະຣະກະນາຄະຣາດ ຈຶ່ງກ່າວວ່າ)

[໔໗໓] ເອົາເທີ້ນ ທ່ານຜູ້ມີລີ້ນສອງແສກ
ວັນນີ້ທ່ານຈຶ່ງພົ້ນຈາກການຖືກຂ້າ
ທຳມະດາລູກມີ ໓ ປະເພດ ຄື
(໑) ລູກສິດ (໔) ລູກບຸນທຳ (໓) ລູກໃນໄສ້
ຢ່າງອື່ນບໍ່ມີ ທ່ານຈົ່ງຍິນດີເທີ້ນ
ທ່ານໄດ້ເປັນບຸດປະເພດໜຶ່ງຂອງຂ້າພະເຈົ້າແລ້ວ

(ພຣະສາດສະດາຕັດພຣະຄາຖາແລ້ວຊົງປະກາດຄວາມນັ້ນວ່າ)

[໔໗໔] ພະຍາຄຸດກ່າວແນວນີ້ແລ້ວ
ກໍເອີນລົງຈັບພາກພື້ນປ່ອຍພະຍານາກ
ກ່າວວ່າ ວັນນີ້ທ່ານລອດພົ້ນໄພທັງປວງແລ້ວ
ຈົ່ງເປັນຜູ້ມີຂ້າພະເຈົ້າຄຸ້ມຄອງທັງທາງບົກທາງນ້ຳເທີ້ນ

[໔໗໕] ໝໍຜູ້ສະຫຼາດເປັນບ່ອນເພິ່ງຂອງຄົນໄຂ້ໄດ້ສັນໃດ
ຫ້ວງນ້ຳເຢັນເປັນບ່ອນເພິ່ງຂອງຄົນຜູ້ກະຫາຍໄດ້ສັນໃດ
ທີ່ພັກເປັນບ່ອນເພິ່ງຂອງຄົນຜູ້ຖືກຄວາມເຢັນເພາະຫິມະລົບກວນສັນໃດ
ແມ່ນຂ້າພະເຈົ້າກໍຈະເປັນບ່ອນເພິ່ງຂອງທ່ານສັນນັ້ນ

(ພະຍາຄຸດເຫັນເຫດນັ້ນແລ້ວ ຈຶ່ງກ່າວວ່າ)

[໔໗໖] ນີ້ພະຍານາກຜູ້ເກີດໃນທ້ອງ
ທ່ານເຊື່ອມສຳພັນກັບພະຍາຄຸດ
ຜູ້ເກີດໃນໜ່ວຍໄຂ່ທີ່ເປັນສັດຕູ
ຍັງນອນຫຍິ່ງແຂ້ວຢູ່ ໄພນັ້ນມີມາແຕ່ບ່ອນໃດນໍ

(ພະຍານາກກ່າວວ່າ)

[໔໗໗] ໃນສັດຕູບຸກຄົນເພິ່ງຣະແວງໄວ້ກ່ອນ ແມ່ນໃນມິດກໍບໍ່ເພິ່ງວາງໃຈ
ໄພທີ່ເກີດຂຶ້ນຈາກຄົນບໍ່ມີໄພຍ່ອມກັດຫຼັງນຈົນເຖິງເຫງົ້າຮາກ

[໔໗໗] ບຸກຄົນຈະເພິ່ງວາງໃຈໃນຄົນຜູ້ເຄີຍກະທຳການຜິດຖຽງກັນມາແລ້ວໄດ້
ແນວໃດນໍ ບຸກຄົນຜູ້ດຳຣົງຢູ່ດ້ວຍການກຽມຕົວຢູ່ເປັນນິດ
ຍ່ອມບໍ່ຍິນດີກັບສັດຕູ

[໔໗໘] ເພິ່ງເຮັດໃຫ້ຜູ້ອື່ນວາງໃຈຕົນ ແຕ່ຕົນເອງບໍ່ເພິ່ງວາງໃຈເຂົາ
ບໍ່ເພິ່ງໃຫ້ຜູ້ອື່ນຣະແວງຕົນ ແຕ່ຕົນເພິ່ງຣະແວງຜູ້ອື່ນ
ວິນຍູຊົນເພິ່ງພະຍາຍາມໂດຍທີ່ຜູ້ອື່ນຈະບໍ່ຮູ້ຄວາມເປັນໄປຂອງຕົນ

(ພຣະສາດສະດາຊົງປະກາດຄວາມນັ້ນວ່າ)

[໔໘໐] ສັດຜູ້ປະເສີດທັງ ໔ ນັ້ນມີເພດພັນດັ່ງເທບພະຍະດາສຸຂຸມາລະຊາດ
ມີຊວດຊົງສັນຖານແລະໄວງາມສະເໝີກັນ
ບໍລິສຸດ ມີກອງກຸສົນຜົນບຸນ ກ້ຽວພາກັນໄປ
ເໝືອນພາຫະນະທຽມດ້ວຍມ້າ ໄດ້ເຂົ້າໄປຫາກະຣຳປິຍະອະເຈລະກະ

[໔໘໑] ລຳດັບນັ້ນແລ ປັນທະຣະກະນາຄະຣາດໄດ້ເຂົ້າໄປຫາອະເຈລະກະ
ຕາມລຳພັງດ້ວຍຕົນເອງແລ້ວໄດ້ກ່າວແນວນີ້ວ່າ ວັນນີ້ ຂ້າພະເຈົ້າລອດຕາຍ
ຜ່ານພົ້ນໄພທັງປວງມາໄດ້ ຄົງບໍ່ເປັນທີ່ພໍໃຈຂອງທ່ານແນ່ນອນ

(ອະເຈລະກະກ່າວວ່າ)

[໔໘໒] ກໍພະຍາຄຸດເປັນທີ່ຮັກຂອງເຮົາຢ່າງແທ້ຈິງ
ຍິ່ງກວ່າປັນທະຣະກະນາຄະຣາດໂດຍບໍ່ຕ້ອງສົງໄສ
ເຮົານັ້ນມີຄວາມຮັກແພງ
ທັງ ໆ ທີ່ຮູ້ຢູ່ ກໍໄດ້ກະທຳກຳຊົ່ວຊ້ານັ້ນລົງໄປ
ບໍ່ໄດ້ເຮັດໄປຍ້ອນຄວາມໂງ່ຈ້າ

(ນາຄະຣາດກ່າວວ່າ)

[໔໘໓] ທຳມະດາບັນພະຊິດຜູ້ພິຈາລະນາເຫັນໂລກນີ້ແລະໂລກໜ້າ
ຍ່ອມຈະບໍ່ມີຄວາມຄິດວ່າ ສິ່ງນີ້ເປັນທີ່ຮັກຂອງເຮົາ
ຫຼືສິ່ງນີ້ບໍ່ເປັນທີ່ຮັກຂອງເຮົາ ກໍທ່ານເປັນຜູ້ບໍ່ສັງລວມ
ແຕ່ປະພຶດລວງຊາວໂລກນີ້ດ້ວຍເພດແຫ່ງຜູ້ມີຄວາມສັງລວມດ້ວຍດີ

[໔໘໔] ທ່ານບໍ່ແມ່ນພຣະອະຣິຍະ ແຕ່ເຮັດເໝືອນພຣະອະຣິຍະ

ບໍ່ແມ່ນຄົນສັງລວມ ແຕ່ເຮັດເໝືອນຄົນສັງລວມ
ມີຊາດຕໍ່າຊາມ ບໍ່ແມ່ນຜູ້ປະເສີດແຕ່ຢ່າງໃດ
ໄດ້ປະພຶດຊົ່ວຊ້າລາມົກຫຼວງຫຼາຍ

(ເມື່ອຕໍາໜິແລ້ວເມື່ອຈະສາບ ຈຶ່ງກ່າວວ່າ)

[໔໙໕] ເຈົ້າຄົນຜູ້ມີນິໄສປະທຸດສະຮ້າຍ ເຈົ້າເປັນຄົນປະທຸດສະຮ້າຍມິດ
ຜູ້ບໍ່ປະທຸດສະຮ້າຍທັງເປັນຄົນເວົ້າຈາສໍ່ສຽດ
ດ້ວຍການກ່າວຄໍາສັດນີ້ ຂໍຫົວຂອງເຈົ້າຈົ່ງແຕກ ໗ ສ່ຽງ

(ພຣະສາດສະດາຊົງປະກາດຄວາມທີ່ພຣະເທວະທັດຖືກແຜ່ນດິນສູບ ຈຶ່ງຕັດວ່າ)

[໔໙໖] ຍ້ອນເຫດນັ້ນ ບຸກຄົນບໍ່ຄວນປະທຸດສະຮ້າຍມິດ
ຍ້ອນວ່າຄົນອື່ນທີ່ຈະຊົ່ວກວ່າຄົນຜູ້ປະທຸດສະຮ້າຍມິດບໍ່ມີ
ອະເຈລະກະຖືກສັດມີພິດສາບກໍາຈັດລົງແລ້ວໃນແຜ່ນດິນ
ທັງ ໆ ທີ່ປະຕິນຍາວ່າ ເຮົາມີຄວາມສັງລວມ
ກໍຖືກທໍາລາຍແລ້ວດ້ວຍຄໍາຂອງຈອມນາຄິນ

**ປັນທະຣະກະນາຄະຣາຊະຊາດົກທີ ໙ ຈົບ**

## ໑. ສໍາພຸລາຊາດົກ (໕໑໙)
## ວ່າດ້ວຍຄວາມຊື່ສັດຂອງພຣະນາງສໍາພຸລາ

(ຍັກທານົບເຫັນພຣະນາງສໍາພຸລາມີຈິດປະຕິພັດ ຈຶ່ງກ່າວວ່າ)

[໔໙໗] ໂອ້ ແມ່ນາງຜູ້ມີລໍາຂາອັນກົມກັ້ງງ ທ່ານເປັນໃຜ
ຢືນສັ່ນສະທ້ານຢູ່ແຕ່ຜູ້ດຽວໃກ້ ໆ ຮ່ອມພູ
ທ່ານຜູ້ມີຊວດຊົງໜ້າອະພິລົມ ເຮົາຖາມແລ້ວ
ຂໍທ່ານຈົ່ງບອກຊື່ແລະເຜົ່າພັນແກ່ເຮົາ

[໔໙໘] ແມ່ນາງຜູ້ມີຊວດຊົງອັນງົດງາມ
ທ່ານເປັນໃຜ ຫຼືເປັນກັນລະຍານີຂອງໃຜ
ສ່ອງສະຫວ່າງສະໄຫວໄປທົ່ວປ່າທີ່ໜ້າອອນຊອນ
ເຊິ່ງເປັນທີ່ທີ່ສີຫະຍັກຢູ່ອາໄສ
ແມ່ນາງຜູ້ຈະເລີນ ເຮົາຂໍໄຫວ້ທ່ານ ເຮົາຄືທານົບຂໍນອບນ້ອມແກ່ທ່ານ

(ພຣະນາງສຳພຸລາໄດ້ຟັງດັ່ງນັ້ນ ຈຶ່ງໄດ້ຕອບວ່າ)

[๒๙๙] ຂ້າພະເຈົ້າຊື່ສຳພຸລາເປັນພຣະຊາຍາ
ຂອງພຣະຣາດຊະບຸດພຣະເຈົ້າເມືອງກາສີ
ເຊິ່ງປະຊາຊົນຮູ້ຈັກພຣະອົງໂດຍພະນາມວ່າ ເຈົ້າຊາຍໂສດຖິເສນ
ທານົບຜູ້ຈະເລີນ ຂໍທ່ານຈົ່ງຮູ້ແນວນີ້
ຂ້າພະເຈົ້າສຳພຸລາຂໍໄຫວ້ທ່ານ ຂໍນອບນ້ອມແກ່ທ່ານ

[๓๐๐] ທ່ານຜູ້ຈະເລີນ ພຣະຣາດຊະໂອຣົດແຫ່ງວິເທຫະຣາດ
ຊົງອາດູນປະທັບຢູ່ໃນປ່າ
ຂ້າພະເຈົ້າອຸປັດຖາກພຣະອົງຜູ້ຊົງຖືກໂຣກບຽດບຽນ

[๓๐๑] ອັນໜຶ່ງ ຂ້າພະເຈົ້າສະແຫວງຫາຂອງປ່າ
ນຳຮັງເຜິ້ງຫຼືຊີ້ນທີ່ເປັນເດືອນໃດມາ ພຣະອົງກໍສະເຫວີຍສິ່ງນັ້ນ
ວັນນີ້ພຣະສະຣີຣະຂອງພຣະອົງຄົງຈະຫ່ຽວແຫ້ງແນ່ນອນ

(ທັງ ๒ ກ່າວໂຕ້ຕອບກັນຕໍ່ໄປວ່າ)

[๓๐๒] ແມ່ນາງສຳພຸລາ ທ່ານຈະເຮັດຫຍັງໄດ້ກັບພຣະຣາດຊະບຸດ
ຜູ້ຊົງຣະງົມໄປດ້ວຍຄວາມອາດູນຢູ່ໃນປ່າ
ເຮົາຈະເປັນພັດສະດາຂອງທ່ານ

[๓๐๓] ຍ້ອນອັດຕະພາບທີ່ທຸບພົນ ເດືອດຮ້ອນຍ້ອນຄວາມເສົ້າໂສກ
ຮູບຮ່າງຂອງຂ້າພະເຈົ້າຈະງົດງາມໄດ້ແນວໃດ ທ່ານຜູ້ຈະເລີນ
ຂໍທ່ານຈົ່ງສະແຫວງຫາຍິງອື່ນທີ່ສວຍງາມກວ່າຂ້າພະເຈົ້າເທີ້ນ

[๓๐๔] ມາເທີ້ນແມ່ນາງ ຈົ່ງຂຶ້ນມາຍັງພູໜ່ວຍນີ້
ເຮົາມີພັນລະຍາຢູ່ ๔๐๐ ນາງ
ທ່ານຈະປະເສີດກວ່ານາງເຫຼົ່ານັ້ນ
ແລະຈະສຳລິດຄວາມປະສົງທຸກຢ່າງ

[๓๐๕] ແມ່ນາງຜູ້ມີຜິວພັນເປ່ງປັ່ງປຽບດັ່ງດວງດາວ
ທ່ານມີໃຈປະສົງສິ່ງໜຶ່ງສິ່ງໃດ
ສິ່ງນັ້ນທັງໝົດຂອງອ້າຍມີຢູ່ຫຼາຍ ຫາໄດ້ງ່າຍ
ຂໍທ່ານຈົ່ງມາຮ່ວມອະພິຣົມກັບອ້າຍໃນມື້ນີ້ເທີ້ນ

[໓໐໖]  ແມ່ນາງສຳພຸລາ ຖ້າທ່ານບໍ່ຍອມເປັນມະເຫສີ
ທ່ານກໍຄວນຈະເປັນອາຫານເຊົ້າຂອງເຮົາໃນວັນຮຸ່ງຂຶ້ນ

[໓໐໗]  ຝ່າຍເຈົ້າທານົບກິນຄົນ ມີຜົມຫຍຸ້ງຫຍອງ ໆ ຊັ້ນ
ຫຍາບຊ້າທາຣຸນ ມີຜິວກາຍດຳແດງ
ໄດ້ຈັບພຣະນາງສຳພຸລານັ້ນຜູ້ບໍ່ເຫັນທີ່ເພິ່ງໃນປ່າລວບໄວ້ໃນວົງແຂນ

[໓໐໘]  ສ່ວນພຣະນາງສຳພຸລານັ້ນຖືກຜີສາດຜູ້ທາຣຸນເຫັນແກ່ອາມິດຂົ່ມເຫັງ
ຕົກຢູ່ໃນອຳນາດຂອງສັດຕູ
ກໍເສົ້າໂສກລຳພັນເຖິງແຕ່ພຣະສະວາມີທໍ່ນັ້ນ

[໓໐໙]  ການທີ່ຣາກສົດຈະກິນເຮົາ
ເຖິງແຕ່ປານນັ້ນ ກໍບໍ່ແມ່ນເປັນຄວາມທຸກຂອງເຮົາດອກ
ເຮົາທຸກຢູ່ແຕ່ວ່າ ພຣະລູກເຈົ້າຈະເຂົ້າພຣະຫະໄທຜິດ

[໓໑໐]  ເທບທັງຫຼາຍເຫັນຈະບໍ່ມີຢູ່ແລ້ວແມ່ນບໍ
ທ້າວໂລກກະບານທັງຫຼາຍຖ້າວ່າບໍ່ມີໃນໂລກນີ້ແລ້ວ
ຄົນທີ່ຈະຫ້າມປາມຍັກຜູ້ບໍ່ສັງລວມທຳການຫຍາບຊ້າ

(ທ້າວສັກກະຊົງພິຈາຣະນາຮູ້ເຫດນັ້ນແລ້ວ ສວຍເອົາພຣະຂັນເພັດຟ້າວສະເດັດໄປປະທັບຢືນ
ເທິງຕູບຂອງທານົບຍັກ ຕັດວ່າ)

[໓໑໑]  ນາງນີ້ມີກຽດຕິຍົດຊື່ສຽງ ປະເສີດກວ່າຍິງທັງຫຼາຍ
ເປັນຍິງສະຫຼາດ ຮຽບຮ້ອຍ ມີເດດຮຸ່ງເຮືອງດັ່ງກອງໄຟ
ເຈົ້າຣາກສົດ ຖ້າເຈົ້າກິນຍິງສາວຜູ້ນີ້
ຫົວຂອງເຈົ້າຈະແຕກອອກ ໆ ສ່ຽງ ເຈົ້າຢ່າເຮັດໃຫ້ນາງເດືອດຮ້ອນ
ຈົ່ງປ່ອຍນາງໄປ ຍ້ອນນາງເປັນຍິງມີສາມີ

(ພຣະສາດສະດາຊົງປະກາດຄວາມນັ້ນວ່າ)

[໓໑໒]  ກໍພຣະນາງສຳພຸລາລອດພົ້ນຈາກຍັກກິນຄົນແລ້ວ
ກໍສະເດັດກັບສູ່ອາສົມດັ່ງແມ່ນົກເຊິ່ງມີລູກອ່ອນມີອັນຕະລາຍບິນກັບຮັງ
ເໝືອນແມ່ງົວນົມກັບມາຍັງບ່ອນຢູ່ອາໄສທີ່ປາສະຈາກລູກງົວ

[໓໑໓]  ພຣະນາງສຳພຸລາຣາດຊະບຸດຕີຜູ້ມີຍົດ

ເມື່ອບໍ່ຊິງເຫັນພຣະສະວາມີຜູ້ເປັນບ່ອນເພິ່ງໃນປ່າ
ກໍມີດວງພຣະເນດມົວມືດຍ້ອນຄວາມຮ້ອນ
ຊິງກັນແສງຢູ່ໃນບ່ອນນັ້ນ

[໓໑໔] ເມື່ອບໍ່ຊິງພົບພຣະຣາດຊະບຸດ ພຣະນາງກໍຊິງໄຫວ້ວອນ
ສະມະນະພາມແລະລືສີຜູ້ສົມບູນດ້ວຍຈະຣະນະວ່າ
ຂ້ານ້ອຍຂໍເຖິງພຣະຜູ້ເປັນເຈົ້າທັງຫຼາຍເປັນບ່ອນເພິ່ງບ່ອນຣະນຶກ

[໓໑໕] ເມື່ອບໍ່ຊິງພົບພຣະຣາດຊະບຸດ ກໍຊິງໄຫວ້ວອນຣາດຊະສີ
ເສືອໂຄ່ງ ແລະໝູ່ເນື້ອເຫຼົ່າອື່ນໃນປ່າວ່າ
ຂ້າພະເຈົ້າຂໍເຖິງທ່ານທັງຫຼາຍເປັນບ່ອນເພິ່ງບ່ອນຣະນຶກ

[໓໑໖] ເມື່ອບໍ່ຊິງພົບພຣະຣາດຊະບຸດ ກໍຊິງໄຫວ້ວອນເທບເຈົ້າ
ຜູ້ສິງສະຖິດຢູ່ທີ່ກໍຫຍ້າລະດາວັນແລະໝູ່ໄມ້ໂອສົດຕະຫຼອດຈົນບັນພົດ
ແລະພົງໄພວ່າ ຂ້າພະເຈົ້າຂໍເຖິງທ່ານທັງຫຼາຍເປັນບ່ອນເພິ່ງບ່ອນຣະນຶກ

[໓໑໗] ເມື່ອບໍ່ຊິງພົບພຣະຣາດຊະບຸດ ກໍຊິງໄຫວ້ວອນ
ໝູ່ດາວນັກຂະສັດໃນຍາມຣາຕີເຊິ່ງມີຣັດສະໝີສະເໝີດ້ວຍດອກຄຸນວ່າ
ຂ້າພະເຈົ້າຂໍເຖິງທ່ານເປັນບ່ອນເພິ່ງບ່ອນຣະນຶກ

[໓໑໘] ເມື່ອບໍ່ຊິງພົບພຣະຣາດຊະບຸດ ກໍຊິງໄຫວ້ວອນເທບທັງຫຼາຍ
ຜູ້ສະຖິດທີ່ແມ່ນ້ຳຄົງຄາເຊິ່ງມີນາມວ່າພາຄີຣະຖີ
ເປັນທີ່ຮອງຮັບການໄຫຼມາແຫ່ງແມ່ນ້ຳສາຍອື່ນຈຳນວນຫຼາຍວ່າ
ຂ້າພະເຈົ້າຂໍເຖິງທ່ານເປັນບ່ອນເພິ່ງບ່ອນຣະນຶກ

[໓໑໙] ເມື່ອບໍ່ຊິງພົບພຣະຣາດຊະບຸດ ກໍຊິງໄຫວ້ວອນ
(ເທບຜູ້ສິງສະຖິດຢູ່ໃນ) ພູເຂົາຫິມະວັນທີ່ປະເສີດກວ່າຂຸນເຂົາທັງປວງ
ເຊິ່ງເຕັມດ້ວຍສີລາວ່າ
ຂ້າພະເຈົ້າຂໍເຖິງທ່ານເປັນບ່ອນເພິ່ງບ່ອນຣະນຶກ

(ໂສດຖີເສນທູນຖາມພຣະນາງສຳພຸລາວ່າ)

[໓໒໐] ພຣະຣາດຊະບຸດຕີຜູ້ມີຍົດ ພຣະນາງກັບມາຈົນຄ່ຳມືດນໍ
ວັນນີ້ພຣະນາງສະມະຄົບກັບໃຜນໍ
ໃຜກັນນໍເປັນທີ່ຮັກຂອງພຣະນາງຍິ່ງກວ່າເຮົາ

(ພຣະນາງສຳພຸລາຕັດວ່າ)

[໓໔໑] ຂ້ານ້ອຍຖືກທານົບຜູ້ເປັນສັດຕູນັ້ນຈັບໄວ້
ໄດ້ກ່າວກັບມັນແນວນີ້ວ່າ
ການທີ່ຣາກສົດຈະກິນເຮົາ
ເຖິງແຕ່ປານນັ້ນກໍບໍ່ແມ່ນຄວາມທຸກຂອງເຮົາ
ເຮົາທຸກຢູ່ແຕ່ວ່າ ພຣະລູກເຈົ້າຈະເຂົ້າພຣະທະໄທຜິດ

(ໂສດຖິເສນໄດ້ຟັງດັ່ງນັ້ນແລ້ວຈຶ່ງຕັດວ່າ)

[໓໔໒] ນາງໂຈນມີເລ້ຫຼ່ຽມຫຼວງຫຼາຍ ຍາກທີ່ຈະຫາຄວາມສັດໄດ້
ຍິງທັງຫຼາຍມີພາວະຮູ້ໄດ້ຍາກເໝືອນປາທີ່ລ່ອຍໄປໃນນ້ຳ

(ພຣະນາງສຳພຸລາຊຶ່ງເຮັດສັດກິຣິຍາຫຼັ່ງນ້ຳລົງທີ່ຫົວຂອງໂສດຖິເສນນັ້ນວ່າ)

[໓໔໓] ຂໍຄວາມສັດຈົ່ງຄອຍພິທັກຮັກສາຂ້ານ້ອຍ
ຢ່າງທີ່ຂ້ານ້ອຍບໍ່ເຄີຍຮັກຊາຍອື່ນຍິ່ງໄປກວ່າພຣະອົງເທີ້ນ
ດ້ວຍການກ່າວຄຳສັດນີ້ ຂໍພຣະໂຣກຂອງພຣະອົງຈົ່ງຣະງັບໄປ

(ພຣະສະສຸຣະດາບົດຕັດຖາມພຣະນາງສຳພຸລາຜູ້ມີອິນຊີຫ່ຽວແຫ້ງວ່າ)

[໓໔໔] ພະຍາຊ້າງ ໗໐໐ ເຊືອກເຊິ່ງມີທະຫານຖືອາວຸດຢ່າງເຂັ້ມແຂງຂັບຂີ່
ແລະນາຍຂະມັງທະນູອີກ ໑,໖໐໐ ນາຍເຝົ້າຮັກສາຕະຫຼອດຄືນຕະຫຼອດວັນ
ແມ່ນາງຜູ້ຈະເລີນ ພຣະນາງຍັງຈະພົບສັດຕູຊະນິດໃດອີກ

(ພຣະນາງສຳພຸລາຂາບທູນວ່າ)

[໓໔໕] ຂໍເດຊະພຣະບິດາ ພຣະຣາດຊະບຸດທອດພຣະເນດເຫັນ
ນາງສະໜົມນາຣີຜູ້ປະດັບຕົບແຕ່ງເຮືອນຮ່າງ ມີຜິວພັນງາມດັ່ງກີບປະທຸມ
ໄວສາວນ້ອຍ ມີສຽງມ່ວນດັ່ງນາງພະຍາຫົງ
ແລະຊົງສະດັບສຽງຫົວຂັບກ່ອມບັນເລງ
ບັດນີ້ສຳລັບຂ້ານ້ອຍ ພຣະລູກເຈົ້າບໍ່ເປັນຄືເມື່ອກ່ອນ

[໓໔໖] ຂໍເດຊະພຣະບິດາ ສະໜົມນາຣີເຫຼົ່ານັ້ນ
ຊົງເຄື່ອງປະດັບລ້ວນເປັນຄຳ ມີເຮືອນຮ່າງເສີດໂສມ
ປະດັບດ້ວຍອະລັງການນານາຊະນິດ ເພີດພີ້ງດັ່ງສາວສະຫວັນ

ເປັນທີ່ໂຜດປານຂອງທ້າວໂສດຖິເສນ ລ້ວນມີຊວດຊີ່ງຫາບ່ອນຕິບໍ່ໄດ້
ເປັນຂັດຕິຍະກັນຍາພາກັນປີນເປີພຣະອົງຢູ່

[໓໘໗] ຂໍເດຊະພຣະບິດາ ຖ້າຫາກພຣະຣາດຊະໂອຣົດ
ຊີງຍ້ອງຍໍຂ້ານ້ອຍແລະບໍ່ຊີງດູໝິ່ນຂ້ານ້ອຍ
ເໝືອນເວລາທີ່ຂ້ານ້ອຍເຄີຍທ່ຽວສະແຫວງຫາຜະລາຜົນ
ລ້ຽງດູພຣະສະວາມີຢູ່ໃນປ່າໃນການກ່ອນແລ້ວສຳລັບຂ້ານ້ອຍ
ປ່ານັ້ນແລປະເສີດກວ່າຣາດຊະສົມບັດໃນເມືອງພາຣານະສີນີ້ສາອີກ

[໓໘໘] ນາຣີຜູ້ມີອາພອນກັ້ງເກົາປະດັບຕົກແຕ່ງຮ່າງກາຍຢ່າງສວຍງາມ
ເຖິງພ້ອມດ້ວຍຄຸນສົມບັດທຸກຢ່າງ ຢູ່ໃນເຮືອນທີ່ມີເຂົ້າແລະນ້ຳ
ທີ່ເຂົາກະກຽມໄວ້ຢ່າງໄພບູນອັນໃດ ແຕ່ບໍ່ເປັນທີ່ຮັກຂອງສາມີ
ການທີ່ນາຣີນັ້ນຂ້າຕົວຕາຍສາຍັງປະເສີດກວ່າການຢູ່ຄອງເຮືອນນັ້ນ

[໓໘໙] ແມ່ນຍິງໃດເປັນຄົນກຳພ້າ ຂັດສົນ ຂາດເຄື່ອງປະດັບ
ນອນເທິງສາດລຳແພນ ແຕ່ເຈົ້ານາງເປັນທີ່ຮັກຂອງສາມີ
ຍິງນີ້ແລແມ່ນຈະເປັນຄົນກຳພ້າກໍຍັງປະເສີດກວ່າ
ຍິງທີ່ເຖິງພ້ອມດ້ວຍຄຸນສົມບັດທຸກຢ່າງ ແຕ່ບໍ່ເປັນທີ່ຮັກຂອງສາມີ

(ພຣະສະສຸຣະດາບົດຕັດສອນພຣະຣາດຊະໂອຣົດວ່າ)

[໓໙໐] ຍິງຜູ້ເກື້ອກູນຊາຍຜູ້ເປັນສາມີຫາໄດ້ຍາກຍິ່ງ
ສາມີຜູ້ເກື້ອກູນຍິງຜູ້ເປັນພັນລະຍາກໍຫາໄດ້ຍາກ ເຈົ້າຜູ້ຈອມຊົນ
ພຣະນາງສຳພຸລາເປັນພັນລະຍາຜູ້ເກື້ອກູນຕໍ່ເຈົ້າແລະເປັນຜູ້ມີສິນ
ເຈົ້າຈົ່ງປະພຶດຕໍ່ພຣະນາງສຳພຸລາຢ່າງຍຸດຕິທຳເທີ້ນ

(ພຣະເຈົ້າໂສດຖິເສນເມື່ອຈະມອບອິສະຣິຍະຍົດແກ່ພຣະນາງສຳພຸລາ ຈຶ່ງຕັດວ່າ)

[໓໙໑] ພຣະນ້ອງນາງຜູ້ຈະເລີນ ຖ້າເມື່ອພຣະນ້ອງນາງ
ໄດ້ໂພຄະອັນໄພບູນແລ້ວລະຄວາມຣິດສະຫຍາໄດ້ຈົນວັນຕາຍ
ອ້າຍແລະຣາດຊະກັນຍາເຫຼົ່ານີ້ທັງໝົດຈະເຮັດຕາມຄຳຂອງພຣະນ້ອງນາງ

**ສຳພຸລາຊາດົກທີ ໗ ຈົບ**

# ໑໐. ຄັນທະຕິນທຸກະຊາດົກ (໕໒໐)
## ວ່າດ້ວຍເທວະດາຊື່ຄັນທະຕິນທຸກະ

(ພຣະໂພທິສັດຄັ້ງເກີດເປັນຣຸກຂະເທວະດາຊື່ຄັນທະຕິນທຸກະ ສະແດງທຳຖວາຍພຣະຣາຊາວ່າ)

[໓໓໒] ຄວາມບໍ່ຜະໝາດເປັນທາງບໍ່ຕາຍ
ຄວາມຜະໝາດເປັນທາງແຫ່ງຄວາມຕາຍ
ຄົນຜູ້ບໍ່ຜະໝາດຊື່ວ່າຍ່ອມບໍ່ຕາຍ
ຄົນຜະໝາດເໝືອນຄົນຕາຍແລ້ວ

[໓໓໓] ຄວາມຜະໝາດເກີດຈາກຄວາມມົວເມົາ
ຄວາມເສື່ອມເກີດຈາກຄວາມຜະໝາດ
ແລະຍ້ອນຄວາມເສື່ອມຈຶ່ງເກີດການປະທຸດສະຮ້າຍ
ທ່ານພຣະຣະຕູສະພະ ຂໍພຣະອົງຢ່າໄດ້ຜະໝາດເລີຍ

[໓໓໔] ແທ້ຈິງ ກະສັດທັງຫຼາຍຜູ້ຜະໝາດຈຳນວນຫຼາຍ
ຍ່ອມເສື່ອມຈາກປະໂຫຍດໃນການປົງຄອງ
ແມ່ນນາຍບ້ານແລະລູກບ້ານກໍເສື່ອມ
ແມ່ນບັນພະຊິດແລະຄະຫຼືຫັດກໍເສື່ອມ

[໓໓໕] ຂໍເດຊະພຣະອົງຜູ້ຊົງຜະດຸງຣັດໃຫ້ຈະເລີນ
ໂພຄະທັງປວງໃນແຄວ້ນຂອງກະສັດຜູ້ຜະໝາດແລ້ວຍ່ອມພິນາດ
ຂໍ້ນັ້ນທ່ານກ່າວວ່າ ເປັນຄວາມທຸກຂອງພຣະຣາຊາ

[໓໓໖] ຂໍເດຊະພຣະມະຫາຣາດ ນັ້ນບໍ່ແມ່ນທຳ
ພຣະອົງຊົງຜະໝາດເກີນຂອບເຂດ
ພວກໂຈນຈຶ່ງປຸ້ນທຳລາຍຊົນນະບົດທີ່ມັ່ງຄັ່ງສົມບູນ

[໓໓໗] ພຣະຣາດຊະບຸດຜູ້ຈະສືບສັນຕະຕິວົງຈັກບໍ່ມີ
ຊັບສິນເງິນຄຳຈັກບໍ່ມີ ພຣະນະຄອນກໍຈັກບໍ່ມີ
ເມື່ອແຄວ້ນຖືກປຸ້ນສະດົມ ພຣະອົງກໍຈະເສື່ອມຈາກໂພຄະທັງປວງ

[໓໓໘] ພຣະຍາດ ມິດ ແລະພຣະສະຫາຍ
ຍ່ອມບໍ່ນັບຖືພຣະອົງຜູ້ເປັນກະສັດ
ເຊິ່ງເສື່ອມຈາກໂພຄະທັງປວງໃນທາງພຣະປິຊາສາມາດ

[໓໓໙] ພົນຊ້າງ ພົນມ້າ ພົນລົດ ແລະພົນຍ່າງເຊິ່ງອາໄສພຣະອົງລ້ຽງຊີບ
ຍ່ອມບໍ່ນັບຖືພຣະອົງວ່າ ເປັນພຣະຣາຊາຜູ້ຄວນນັບຖື

[໓໔໐] ສິຣິຍ່ອມລະຄົນໂງ່ຜູ້ບໍ່ຈັດແຈງວຽກງານ
ມີຄວາມຄິດຊົ່ວຊາມ ມີປັນຍາຊາມໄປເໝືອນງູລອກຄາບເກົ່າຖິ້ມ

[໓໔໑] ກະສັດຜູ້ຊົງຈັດແຈງວຽກງານດີ ຊົງຂະຫຍັນຕະຫຼອດການ
ບໍ່ກຽດຄ້ານ ໂພຄະທັງປວງຍ່ອມຈະເລີນໂດຍຍິ່ງ
ເໝືອນຝູງງົວທີ່ມີງົວອຸສະພະເປັນຈ່າຝູງ

[໓໔໒] ຂໍເດຊະພຣະມະຫາຣາດ ຂໍພຣະອົງຊົງສະເດັດໄປ
ສະດັບຮັບຟັງເຫດການທັງໃນແຄວ້ນແລະຊົນນະບົດ
ເມື່ອໄດ້ທອດພຣະເນດແລະສະດັບແລ້ວ ເພິ່ງປະຕິບັດໄປຕາມນັ້ນ

(ຊາຍແກ່ຊາວບ້ານຖືກໜາມປັກຕີນທີ່ປະຕູເຮືອນ ຈຶ່ງນັ່ງຍອງຍໍ້ບົ່ງໜາມພ້ອມດ່າພຣະຣາຊາວ່າ)

[໓໔໓] ຂໍໃຫ້ພຣະເຈົ້າປັນຈາລະຈົ່ງຖືກລູກສອນສຽບແທງໃນສົງຄາມ
ສະເຫວີຍທຸກຂະເວທະນາເໝືອນຕົວເຮົາຖືກໜາມປັກ
ສະເຫວີຍທຸກຂະເວທະນາໃນວັນນີ້

(ພໍຣາດຊະປຸໂຣຫິດໄດ້ຍິນຄຳດ່າຂອງຊາຍແກ່ ຈຶ່ງຖາມວ່າ)

[໓໔໔] ລຸງແກ່ແລ້ວ ຫູຕາມືດມົວ ເບິ່ງເຫັນບໍ່ຄັກ ໜາມຈຶ່ງປັກ
ໃນຂໍ້ນີ້ ພຣະເຈົ້າພົມມະທັດມີຄວາມຜິດອັນໃດນໍານໍ

(ຊາຍແກ່ໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໓໔໕] ທ່ານພາມ ໃນຂໍ້ທີ່ຂ້າພະເຈົ້າຖືກໜາມປັກ
ພຣະເຈົ້າພົມມະທັດມີຄວາມຜິດຢ່າງຫຼາຍ
ຍ້ອນພຣະອົງບໍ່ໄດ້ພິທັກຄຸ້ມຄອງ
ຊາວຊົນນະບົດຈຶ່ງຖືກກົດຂີ່ດ້ວຍການບູຊາອັນບໍ່ເປັນທຳ

[໓໔໖] ກາງຄືນພວກໂຈນກໍປຸ້ນສະດົມ
ກາງເວັນພວກເຈົ້າໜ້າທີ່ກໍກົດຂີ່
ໃນແຄວ້ນຂອງພຣະຣາຊາຜູ້ໂກງ
ຄົນຜູ້ປະກອບວຽກງານອັນບໍ່ຊອບທຳຈຶ່ງມີຢູ່ຫຼາຍ

[໓໔໗] ເມື່ອໄພເຊັ່ນນີ້ເກີດຂຶ້ນ ພາມ
ພວກມານົບທີ່ຢ້ານໄພຈຶ່ງນຳໜາມໃນປ່າມາແລ້ວສ້າງບ່ອນຫຼົບລີ້

(ຍິງຊະຣາຜູ້ເກັບຜັກຫັກຟືນຈາກປ່າມາລ້ຽງລູກສາວຂຶ້ນພຸ່ມໄມ້ ກຳລັງເກັບຜັກຢູ່ພາດຕົກລົງມາ ເມື່ອຈະດ່າພຣະຣາຊາໂດຍແຊ່ງໃຫ້ຕາຍ ຈຶ່ງກ່າວວ່າ)

[໓໔໘] ໃນແຄວັ້ນຂອງພຣະເຈົ້າພົມມະທັດ
ຍິງສາວຫາຜົວບໍ່ໄດ້ ແກ່ລົງໄປ
ເມື່ອໃດນໍ ພຣະເຈົ້າພົມມະທັດຈັກສະຫວັນນະຄົດໄປສາ

(ເມື່ອຣາດຊະປຸໂຣຫິດຈະຄັດຄ້ານນາງ ຈຶ່ງກ່າວວ່າ)

[໓໔໙] ແມ່ຍິງຊົ່ວຊ້າ ບໍ່ເຂົ້າໃຈເຫດຜົນ ທ່ານນະເວົ້າບໍ່ດີເລີຍ
ພຣະຣາຊາເຄີຍຫາຜົວໃຫ້ພວກແມ່ຍິງສາວຢູ່ໃສກັນ

(ຍິງຊະຣາໄດ້ຍິນດັ່ງນັ້ນ ຈຶ່ງກ່າວວ່າ)

[໓໕໐] ທ່ານພາມ ບໍ່ແມ່ນວ່າຂ້າພະເຈົ້າເວົ້າບໍ່ດີ ຂ້າພະເຈົ້າເຂົ້າໃຈເຫດຜົນ
ຍ້ອນພຣະເຈົ້າພົມມະທັດບໍ່ໄດ້ພິທັກຄຸ້ມຄອງ
ຊາວຊົນນະບົດຈຶ່ງຖືກກົດຂີ່ດ້ວຍການບູຊາອັນບໍ່ເປັນທຳ
[໓໕໑] ກາງຄືນພວກໂຈນກໍປຸ້ນສະດົມ ກາງເວັນພວກເຈົ້າໜ້າທີ່ກໍກົດຂີ່
ໃນແຄວັ້ນຂອງພຣະຣາຊາໂກງ
ຄົນຜູ້ປະກອບວຽກງານອັນບໍ່ຊອບທຳຈຶ່ງມີຢູ່ຫຼາຍ
ເມື່ອຄວາມເປັນຢູ່ລຳບາກ ພັນລະຍາກໍລ້ຽງໄດ້ຍາກ
ຢູ່ໃສແມ່ຍິງຜູ້ສາວຈະມີສາມີໄດ້ນໍ

(ເມື່ອຊາວນາກຳລັງໄຖນາ ງົວຊື່ສາລິຍະຖືກຜານບາດລົ້ມລົງ ເຂົາເມື່ອຈະດ່າພຣະຣາຊາຈຶ່ງກ່າວ ວ່າ)

[໓໕໔] ຂໍໃຫ້ພຣະເຈົ້າປັນຈາລະຖືກຫອກແທງລົ້ມນອນກິ້ງໃນສົງຄາມ
ເໝືອນງົວພະລິພັດສາລິຍະຜູ້ໜ້າສົງສານຖືກຜານບາດລົ້ມນອນກິ້ງຢູ່

(ເມື່ອຣາດຊະປຸໂຣຫິດຈະຄັດຄ້ານຊາວນານັ້ນ ຈຶ່ງກ່າວວ່າ)

[໓໕໓] ເຈົ້າຄົນຊາດຊົ່ວ ການທີ່ເຈົ້າໂກດພຣະເຈົ້າພົມມະທັດບໍ່ຖືກຕ້ອງ
ເຈົ້າທຳຮ້າຍງົວຂອງຕົນເອງ ກັບມາສາບແຊ່ງພຣະຣາຊາ

(ຊາວນາໄດ້ຟັງດັ່ງນັ້ນ ຈຶ່ງກ່າວວ່າ)

[໓໕໔] ທ່ານພາມ ຂ້າພະເຈົ້າໂກດພຣະເຈົ້າພົມມະທັດໂດຍທຳ
ຍ້ອນພຣະເຈົ້າພົມມະທັດບໍ່ໄດ້ພິທັກຄຸ້ມຄອງ
ຊາວຊົນນະບົດຈຶ່ງຖືກກົດຂີ່ດ້ວຍການບູຊາອັນບໍ່ເປັນທຳ

[໓໕໕] ກາງຄືນພວກໂຈນກໍປຸ້ນສະດົມ ກາງເວັນພວກເຈົ້າໜ້າທີ່ກໍກົດຂີ່
ໃນແຄວ້ນຂອງພຣະຣາຊາຂີ້ໂກງ
ຄົນຜູ້ປະກອບວຽກງານອັນບໍ່ຊອບທຳຈຶ່ງມີຢູ່ຫຼາຍ

[໓໕໖] ແມ່ຄົວຄົງຫຸງໃໝ່ແນ່ນອນ ຈຶ່ງນຳອາຫານມາສາຍ
ຂ້າພະເຈົ້າມົວແຕ່ແນມເບິ່ງຄົນນຳອາຫານມາ
ງົວສາລິຍະຈຶ່ງຖືກຜານບາດ

(ຄົນຮີດນົມງົວຖືກແມ່ງົວດີດລົ້ມກິ້ງໄປພ້ອມກັບນົມສົດ ເມື່ອຈະດ່າພຣະຣາຊາຈຶ່ງກ່າວວ່າ)

[໓໕໗] ຂໍພຣະເຈົ້າປັນຈາລະຈົ່ງຖືກຟັນດ້ວຍດາບເດືອດຮ້ອນຢູ່ໃນສົງຄາມ
ເໝືອນເຮົາຖືກແມ່ງົວນົມດີດຈົນນ້ຳນົມຂອງເຮົາກິ້ງເທ່ຍໃນວັນນີ້

(ຣາດຊະປຸໂຣຫິດກ່າວວ່າ)

[໓໕໘] ສັດລ້ຽງຫຼັ່ງນ້ຳນົມຖິ້ມເອງ ບຽດບຽນຄົນລ້ຽງສັດເອງ
ໃນຂໍ້ນີ້ ພຣະເຈົ້າພົມທັດມີຄວາມຜິດອັນໃດບໍານໍ
ທ່ານຜູ້ຈະເລີນບໍ່ໜ້າຈະຕິຕຽນພຣະອົງທ່ານເລີຍ

(ເມື່ອຣາດຊະປຸໂຣຫິດກ່າວຈົບລົງ ຄົນຮີດນົມໄດ້ກ່າວວ່າ)

[໓໕໙] ທ່ານພາມ ພຣະເຈົ້າປັນຈາລະຄວນຈະຖືກຕິຕຽນ
ຍ້ອນພຣະເຈົ້າພົມມະທັດບໍ່ພິທັກຄຸ້ມຄອງ
ຊາວຊົນນະບົດຈຶ່ງຖືກກົດຂີ່ດ້ວຍການບູຊາອັນບໍ່ເປັນທຳ

[໓໖໐] ກາງຄືນພວກໂຈນກໍປຸ້ນສະດົມ ກາງເວັນພວກເຈົ້າໜ້າທີ່ກໍກົດຂີ່
ໃນແຄວ້ນຂອງພຣະຣາຊາຂີ້ໂກງ
ຄົນຜູ້ປະກອບວຽກງານອັນບໍ່ຊອບທຳຈຶ່ງມີຢູ່ຫຼາຍ

[໓໖໑] ແມ່ງົວຕົວດຸຮ້າຍ ປາດປຽວ ເມື່ອກ່ອນພວກເຮົາບໍ່ໄດ້ຮີດນົມມັນ

ບັດນີ້ ພວກເຮົາຖືກເຈົ້າໜ້າທີ່ຕ້ອງການນ້ຳນົມລົບກວນ
ຈຶ່ງຕ້ອງຮີດນົມມັນໃນວັນນີ້

(ພວກເດັກຊາວບ້ານເຫັນແມ່ງົວນົມທີ່ລູກຖືກຂ້າບໍ່ຍອມກິນຫຍ້າກິນນ້ຳ ພຽງຮ້ອງຫາລູກຢູ່
ເມື່ອຈະພາກັນດ່າພຣະຣາຊາ ຈຶ່ງກ່າວວ່າ)

[໓໓໔] ຂໍພຣະເຈົ້າປັນຈາລະຈົ່ງພັດພາກຈາກພຣະຣາດຊະບຸດ
ຄ່ຳຄວນໝົ່ນໝອງເໝືອນແມ່ງົວຜູ້ໜ້າສົງສານຕົວນີ້
ພັດພາກຈາກລູກແລ່ນໄປທົ່ວຄ່ຳຄວນຢູ່

(ລຳດັບນັ້ນ ປຸໂຣຫິດກ່າວວ່າ)

[໓໓໓] ສັດລ້ຽງຂອງຄົນລ້ຽງສັດເພິ່ງແລ່ນໄປມາຫຼືຮ້ອງຄ່ຳຄວນ
ໃນຂໍ້ນີ້ ພຣະເຈົ້າພົມທັດມີຄວາມຜິດອັນໃດນຳນໍ

(ລຳດັບນັ້ນ ພວກເດັກຊາວບ້ານກ່າວວ່າ)

[໓໓໔] ທ່ານພາມ ພຣະເຈົ້າພົມມະທັດມີຄວາມຜິດ
ຍ້ອນພຣະເຈົ້າພົມມະທັດບໍ່ໄດ້ພິທັກຄຸ້ມຄອງ
ຊາວຊົນນະບົດຈຶ່ງຖືກກົດຂີ່ດ້ວຍການບູຊາອັນບໍ່ເປັນທຳ
[໓໓໕] ກາງຄືນພວກໂຈນກຳປຸ້ນສະດົມ ກາງເວັນພວກເຈົ້າໜ້າທີ່ກຳກົດຂີ່
ໃນແຄວ້ນຂອງພຣະຣາຊາໂກງ
ຄົນຜູ້ປະກອບວຽກງານອັນບໍ່ຊອບທຳຈຶ່ງມີຢູ່ຫຼາຍ
ລູກງົວທີ່ຍັງດື່ມນົມຈຶ່ງຖືກຂ້າຍ້ອນຕ້ອງການໜັງເຮັດຝັກດາບ

(ພຣະໂພທິສັດບັນດານໃຫ້ກົບແຊ່ງດ່າພຣະຣາຊາວ່າ)

[໓໓໖] ຂໍພຣະເຈົ້າປັນຈາລະພ້ອມທັງພຣະໂອຣົດຈົ່ງຖືກຂ້າກິນ
ໃນສະນາມຮົບເໝືອນເຮົາເຊິ່ງເກີດໃນປ່າຖືກກາບ້ານຂ້າກິນໃນວັນນີ້

(ຣາດຊະປຸໂຣຫິດໄດ້ຟັງດັ່ງນັ້ນ ຈຶ່ງສົນທະນາກັບກົບວ່າ)

[໓໓໗] ເຈົ້າກົບ ພຣະຣາຊາທັງຫຼາຍໃນມະນຸດໂລກ
ຈະຈັດການພິທັກຮັກສາເຫຼົ່າສັດທັງປວງບໍ່ໄດ້
ພຣະຣາຊາຈະຈັດວ່າເປັນອະທຳຈາຣີບຸກຄົນ
ຍ້ອນເຫດພຽງກາກິນສັດເຊັ່ນທ່ານຫາບໍ່ໄດ້

(ກົບໄດ້ຟັງດັ່ງນັ້ນ ຈຶ່ງໄດ້ກ່າວວ່າ)

[໓໙໘] ທ່ານເປັນພົນມະຈາຣີບຸກຄົນຜູ້ບໍ່ມີທໍາ
ຈຶ່ງກ່າວຍ້ອງຍໍກະສັດ
ເມື່ອປະຊາກອນຈໍານວນຫຼາຍຖືກປຸ້ນຢູ່
ທ່ານກໍຍັງບູຊາພຣະຣາຊາຜູ້ເລີະເລືອນຢູ່ໄດ້

[໓໙໗] ທ່ານພາມ ຖ້າແຄວ້ນນີ້ເພິ່ງມີພຣະຣາຊາທີ່ດີແລ້ວ
ກໍຈະມັ່ງຄັ່ງ ເບ່ງບານ ຜ່ອງໃສ
ຝູງກາກໍຈະໄດ້ກິນກ້ອນເຂົ້າທີ່ດີເຊິ່ງເປັນການບູຊາ
ບໍ່ເພິ່ງກິນສັດເຊັ່ນເຮົາເລີຍ

**ຄັນທະຕິນທຸກະຊາດົກທີ ໑໐ ຈົບ**

# ລວມຊາດົກທີ່ມີໃນນິບາດນີ້ ຄື

໑. ກິງສັນທະຊາດົກ
໓. ຊະຍັດທິສະຊາດົກ
໕. ສໍາພະວະຊາດົກ
໗. ທະກະຣັກຂະສະຊາດົກ
໙. ສໍາພຸລາຊາດົກ
໒. ກຸມພະຊາດົກ
໔. ສັດທັນຕະຊາດົກ
໖. ມະຫາກະປິຊາດົກ
໘. ປັນທະຣະກະນາຄະຣາຊະຊາດົກ
໑໐. ຄັນທະຕິນທຸກຊາດົກ

**ຕິງສະຕິນິບາດ ຈົບ**

# ໑໗. ຈັດຕາລີສະນິບາດ

## ໑. ເຕສະກຸນະຊາດົກ (໕໒໑)
## ວ່າດ້ວຍນົກ ໓ ຕົວ

(ພຣະຣາຊາຕັດຖາມທຳກັບນົກເວດສັນດອນໃນທ່າມກາງມະຫາຊົນວ່າ)

[໑] ລູກນົກ ຂໍຄວາມຈະເລີນຈົ່ງມີແກ່ລູກ ພໍ່ຂໍຖາມລູກເວດສັນດອນວ່າ
ກິດອັນໃດບຸກຄົນຜູ້ປະສົງຈະຄອບຄອງຣາດຊະສົມບັດ
ເຮັດແລ້ວເປັນກິດອັນປະເສີດ

(ນົກເວດສັນດອນຍັງບໍ່ທູນຕອບບັນຫາ ແຕ່ທູນເຕືອນພຣະຣາຊາຍ້ອນຄວາມຜະໝາດກ່ອນແລ້ວ
ຈຶ່ງຂາບທູນວ່າ)

[໒] ດົນແລ້ວນໍ ພຣະເຈົ້າກັງສະພຣະຣາດຊະບິດາຂອງເຮົາ
ຜູ້ຊົງຄອບຄອງເມືອງພາຣານະສີ ຜູ້ມີຄວາມຜະໝາດ
ໄດ້ຕັດຖາມເຮົາຜູ້ເປັນບຸດເຊິ່ງຫາຄວາມຜະໝາດບໍ່ໄດ້

(ນົກເວດສັນດອນເມື່ອທູນເຕືອນຢ່າງນີ້ແລ້ວ ຈຶ່ງຂາບທູນວ່າ)

[໓] ຂໍເດຊະພຣະບໍຣົມມະກະສັດ ອັນດັບໃນເບື້ອງຕົ້ນ
ພຣະຣາຊາເພິ່ງຊົງຫ້າມການຕັດຄຳບໍ່ຈິງ ຄວາມໂກດ
ຄວາມເປັນຜູ້ມັກມ່ວນມັກຫຼິ້ນ ຕໍ່ແຕ່ນັ້ນເພິ່ງຕັດສັ່ງໃຫ້ເຮັດຣາດຊະກິດ
ບັນດິດທັງຫຼາຍກ່າວວ່າ ນັ້ນເປັນພຣະຣາດຊະປະເພນີ

[໔] ຂໍເດຊະສະເດັດພໍ່ ເມື່ອກ່ອນກຳໃດເປັນກຳເຮັດໃຫ້ເດືອດຮ້ອນ
ໂດຍບໍ່ຕ້ອງສົງໄສ ພຣະອົງຊົງເຮັດໄວ້ແລ້ວ
ກຳໃດພຣະອົງຊົງມີຄວາມກຳໜັດແລະຄວາມຂັດເຄືອງ
ຊົງເຮັດກຳນັ້ນພຣະອົງບໍ່ເພິ່ງເຮັດຕໍ່ໄປອີກ

[໕] ຂໍເດຊະພຣະອົງຜູ້ຜະດຸງຣັດໃຫ້ຈະເລີນ
ໂພຄະທັງປວງໃນແຄວ້ນຂອງກະສັດຜູ້ຜະໝາດແລ້ວຍ່ອມພິນາດ
ຂໍ້ນັ້ນທ່ານກ່າວວ່າ ເປັນຄວາມທຸກຂອງພຣະຣາຊາ

[໖] ຂໍເດຊະສະເດັດພໍ່ ເທບທິດາຊື່ສີຣິແລະອະລັກຂີຖືກສຸຈິວານະເສດຖີຖາມ
ໄດ້ຕອບວ່າ ຂ້ານ້ອຍຊື່ນຊົມຍິນດີຄົນທີ່ຂະຫຍັນໝັ່ນພຽນແລະບໍ່ຣິດສະຫຍາ

[໗] ຂໍເດຊະມະຫາຣາດ ສ່ວນອະລັກຂີເທບທິດາເປັນຄົນກາລະກັນນີ
ທັກກຸສົນຈັກ ຍ່ອມຊື່ນຊົມຍິນດີຄົນຣິດສະຫຍາ ຄົນໃຈຮ້າຍ
ມັກທຳລາຍກຸສົນກຳ

[໘] ຂໍເດຊະມະຫາຣາດ ພຣະອົງນັ້ນໂຜດຊົງມີພຣະທະໄທດີ
ໃນຊົນທັງປວງ ຈົ່ງຊົງພິທັກຮັກສາຊົນທັງປວງ
ໂຜດຊົງຂັບນາງເທບທິດາທີ່ອັບໂຊກອອກໄປ
ຂໍພຣະຣາດຊະນີເວດຈົ່ງເປັນບ່ອນຢູ່ຂອງນາງເທບທິດາທີ່ອຳນວຍໂຊກທໍ່ນັ້ນເທີ້ນ

[໙] ຂໍເດຊະພຣະອົງຜູ້ເປັນເຈົ້າແຫ່ງຊົນຊາວກາສີ
ຍ້ອນວ່າບຸຣຸດຜູ້ເຖິງພ້ອມດ້ວຍປັນຍາແລະຄວາມພຽນນັ້ນ
ມີອັດທະຍາໄສກວ້າງຂວາງ ຍ່ອມຕັດຮາກເຫງົ້າແລະຍອດຂອງສັດຕູໄດ້ຂາດ

[໑໐] ແທ້ຈິງ ແມ່ນທ້າວສັກກະຜູ້ເປັນເຈົ້າແຫ່ງພູດ
ກໍບໍ່ໄດ້ຊົງຜະໝາດໃນຄວາມຂະຫຍັນໝັ່ນພຽນ
ພຣະອົງຊົງທຳຄວາມພຽນໃນກັນລະຍານະທຳ
ຊົງສົນພຣະທະໄທໃນຄວາມຂະຫຍັນໝັ່ນພຽນ

[໑໑] ຄົນທັບ ພົມ ເທວະດາທັງຫຼາຍທີ່ມີຊີວິດກ່ຽວເນື່ອງກັບ
ພຣະຣາຊາເຫຼົ່ານັ້ນເມື່ອພຣະອົງຊົງຂະຫຍັນໝັ່ນພຽນ
ບໍ່ຜະໝາດ ກໍຍ່ອມຈະໄປນຳ

[໑໒] ຂໍເດຊະສະເດັດພໍ່ ຂໍສະເດັດພໍ່ຢ່າຊົງຜະໝາດ
ຢ່າຊົງໂກດ ແລ້ວຕັດສັ່ງໃຫ້ເຮັດຣາດຊະກິດ
ອັນໜຶ່ງ ໂຜດຊົງພະຍາຍາມໃນຣາດຊະກິດ
ຍ້ອນຄົນບໍ່ຂີ້ຄ້ານຍ່ອມປະສົບຄວາມສຸກ

[໑໓] ຂໍ້ຄວາມເຫຼົ່ານັ້ນທີ່ຂ້າພຣະອົງກ່າວແກ້ໃນບັນຫາຂອງສະເດັດພໍ່
ທັງຫຼາຍເຫຼົ່ານີ້ເປັນວັດຕະບົດ ເປັນອະນຸສາສະນີສຳລັບສະເດັດພໍ່
ອັນສາມາດຊ່ອຍນິດໃຫ້ເຖິງຄວາມສຸກແລະໃຫ້ທຸກເກີດແກ່ສັດຕູໄດ້

(ພຣະຣາຊາຕັດຖາມຣາດຊະທຳກັບນາງນິກກຸນທະລິນີວ່າ)

[໑໔] ແມ່ກຸນທະລິນີ ສະກຸນີຜູ້ເປັນເຜົ່າພັນຂອງຜູ້ມີບັນດາສັກ
ເຈົ້າຄົງຈະເຂົ້າໃຈບັນຫາ ກິດອັນໃດບຸກຄົນຜູ້ປະສົງຈະຄອບຄອງ
ຣາດຊະສົມບັດທຳແລ້ວເປັນກິດອັນປະເສີດ

(ນາງນົກກຸນທະລິນີຂາບທູນວ່າ)

[໑໕] ຂໍເດຊະສະເດັດພໍ່ ມີເຫດຢູ່ ໔ ປະການທີ່ນັ້ນ
ທີ່ປະໂຫຍດສຸກທັງປວງດຳຣົງໝັ້ນຢູ່ໄດ້ ຄື
ການໄດ້ລາບທີ່ຍັງບໍ່ໄດ້ ໑ ການຕາມຮັກສາລາບທີ່ໄດ້ແລ້ວ ໑

[໑໖] ຂໍເດຊະສະເດັດພໍ່ ພຣະອົງໂຜດຊົງຮູ້ຈັກໝູ່ອຳມາດ
ຜູ້ເປັນນັກປາດ ສະຫຼາດໃນປະໂຫຍດ
ບໍ່ແມ່ນນັກເລງການພະນັນ ບໍ່ແມ່ນຄົນໂລເລ
ບໍ່ແມ່ນນັກເລງລ້າງຜານເຫົ້ນ ຂ້ານ້ອຍ

[໑໗] ຂໍເດຊະສະເດັດພໍ່ ອຳມາດຄົນໃດເພິ່ງຮັກສາຊັບ
ທີ່ພຣະອົງເພິ່ງມີໄວ້ໄດ້ເໝືອນນາຍສາຣະຖີຍຶດລົດ
ອຳມາດຜູ້ນັ້ນພຣະອົງໂຜດຊົງໃຫ້ເຮັດຣາດຊະກິດເທີ້ນ

[໑໘] ພຣະຣາຊາເພິ່ງສົງເຄາະຊົນຝ່າຍໃນໃຫ້ດີ
ກວດກາຣາດຊະຊັບດ້ວຍພຣະອົງເອງ
ບໍ່ເພິ່ງຝັງຂຸມຊັບ ແລະໃຫ້ກູ້ໜີ້ໂດຍຊົງໄວ້ວາງພຣະທະໄທຜູ້ອື່ນ

[໑໙] ພຣະຣາຊາຄວນຮູ້ຄວາມຈະເລີນແລະຄວາມເສື່ອມດ້ວຍພຣະອົງເອງ
ຄວນຊົງຮູ້ສິ່ງທີ່ຊົງກະທຳແລ້ວແລະຍັງບໍ່ໄດ້ຊົງກະທຳ
ດ້ວຍພຣະອົງເອງ ເພິ່ງຂົ່ມຄົນທີ່ຄວນຂົ່ມ ຍ້ອງຍໍຄົນທີ່ຄວນຍ້ອງຍໍ

[໔໐] ຂໍເດຊະພຣະອົງຜູ້ເປັນຈອມທັບ
ຂໍພຣະອົງຊົງໂພດພ່ຳສອນສິ່ງທີ່ເປັນປະໂຫຍດ
ແກ່ຊາວຊົນນະບົດດ້ວຍພຣະອົງເອງ
ຂ້າຣາດຊະການຜູ້ບໍ່ມີທຳທີ່ຊົງໃຊ້ສອຍຢ່າໄດ້ເຮັດພຣະຣາດຊະຊັບ
ແລະຣັດສີມາຂອງພຣະອົງໃຫ້ພິນາດເລີຍ

[໔໑] ອັນໜຶ່ງ ພຣະອົງຢ່າຊົງກະທຳຫຼືຕັດໃຊ້ໃຫ້ຜູ້ອື່ນ
ເຮັດຣາດຊະກິດດ້ວຍຄວາມຮີບຟ້າວ

ຍ້ອນວຽກງານທີ່ເຮັດດ້ວຍຄວາມຮີບຮ້ອນບໍ່ດີເລີຍ
ຄືນໂງ່ຍ່ອມເດືອດຮ້ອນໃນພາຍຫຼັງຍ້ອນການເຮັດເຊັ່ນນັ້ນ

[໔໘] ຂໍພຣະຫະໄທຂອງພຣະອົງຢ່າຊົງລ່ວງເລີຍກຸສົນ
ຂໍພຣະອົງຢ່າຊົງປ່ອຍພຣະຫະໄທໃຫ້ຂຸ່ນເຄືອງຮຸນແຮງ
ຍ້ອນວ່າສະກຸນທັງຫຼາຍທີ່ມັ່ງຄັ່ງ
ເຖິງຄວາມບໍ່ເປັນສະກຸນຍ້ອນຄວາມໂກດ

[໔໙] ຂໍເດຊະສະເດັດພໍ່ ຂໍພຣະອົງຢ່າຊົງໃຫ້ປະຊາຊົນ
ຍັ່ງລົງເພື່ອຄວາມຫາຍຍານະ
ຍ້ອນເຂົ້າພຣະຫະໄທວ່າ ເຮົາເປັນໃຫຍ່
ຂໍພວກສະຕີແລະບຸຣຸດຂອງພຣະອົງຢ່າໄດ້ມີຄວາມທຸກເລີຍ

[໔໔] ພຣະຣາຊາຜູ້ປາສະຈາກອາການຂົນພອງສະຍອງເກົ້າ
ມີພຣະຫະໄທໃຝ່ຫາແຕ່ກາມ ໂພຄະທັງປວງຈັກພິນາດໄປ
ຂໍ້ນັ້ນທ່ານກ່າວວ່າ ເປັນຄວາມທຸກຂອງພຣະຣາຊາ

[໔໕] ຂໍ້ຄວາມເຫຼົ່ານັ້ນທີ່ຂ້ານ້ອຍກ່າວແກ້ໃນບັນຫາຂອງສະເດັດພໍ່
ນັ້ນເປັນວັດຕະບົດ ຂໍ້ນີ້ແລເປັນອະນຸສາສະນີສຳລັບສະເດັດພໍ່
ຂໍເດຊະພຣະມະຫາຣາດ ບັດນີ້
ສະເດັດພໍ່ເພິ່ງຊົງຂະຫຍັນໝັ່ນພ່ຳເພັງບຸນ
ຢ່າຊົງເປັນນັກເລງ ຢ່າຊົງລ້າງຜານພຣະຣາດຊະຊັບ
ຄວນຊົງເປັນຜູ້ມີສິນ ຍ້ອນຄົນທຸສິນຕ້ອງຕົກນະຮົກ

(ພຣະຣາຊາຕັດຖາມບັນຫາກັບນົກຊຳພຸກະບັນດິດວ່າ)

[໔໖] ລູກຊຳພຸກະ ລູກໄດ້ຖາມໂກສິຍະໂຄດແລ້ວ
ແລະແມ່ກຸນທະລິນີພໍ່ກໍໄດ້ຖາມແລ້ວເຊັ່ນກັນ
ເວລານີ້ ລູກຈົ່ງບອກກຳລັງອັນສູງສຸດກວ່າກຳລັງທັງຫຼາຍແດ່

(ນົກຊຳພຸກະບັນດິດສະແດງທຳແກ່ພຣະຣາຊາວ່າ)

[໔໗] ໃນໂລກມີກຳລັງຢູ່ ໕ ປະການ ມີຢູ່ໃນບຸຣຸດ
ຜູ້ມີອັດທະຍາໄສກວ້າງຂວາງ ບັນດາກຳລັງທັງ ໕ ປະການນັ້ນ
ຂຶ້ນຊື່ວ່າກຳລັງແຂນທ່ານກ່າວວ່າ ເປັນກຳລັງສຸດທ້າຍ

[໔໗] ຂໍເດຊະພຣະອົງຜູ້ຊົງພຣະຊົນມາຍຸຍືນຍາວ
ສ່ວນກຳລັງແຫ່ງໂພຄະທ່ານກ່າວວ່າ ເປັນກຳລັງທີ ໔
ແລະກຳລັງແຫ່ງອຳມາດທ່ານກ່າວວ່າ ເປັນກຳລັງທີ ໓

[໔໙] ອັນໜຶ່ງ ກຳລັງແຫ່ງຊາດສະກຸນອັນຍິ່ງນັ້ນ
ເປັນກຳລັງທີ ໔ ຢ່າງບໍ່ຕ້ອງສົງໄສ
ກຳລັງທັງໝົດ ໔ ປະການເຫຼົ່ານັ້ນບັນດິດຍ່ອມຍຶດຖືໄວ້ໄດ້

[໖໐] ກຳລັງປັນຍານັ້ນເປັນກຳລັງປະເສີດສຸດ
ເປັນຍອດກຳລັງກວ່າກຳລັງທັງຫຼາຍ
ບັນດິດຜູ້ມີກຳລັງປັນຍາສະໜັບສະໜູນຍ່ອມປະສົບປະໂຫຍດ

[໖໑] ແມ່ນເຖິງຄົນມີປັນຍາຊາມຈະໄດ້ແຜ່ນດິນທີ່ອຸດົມສົມບູນກໍຈິງ
ຄົນອື່ນຜູ້ມີປັນຍາຍ່ອມກົດຂີ່ເຂົາເຊິ່ງບໍ່ປະສົງຈະໃຫ້
ຢຶດຄອງແຜ່ນດິນນັ້ນສາ

[໖໔] ຂໍເດຊະພຣະອົງຜູ້ເປັນເຈົ້າແຫ່ງຊົນຊາວກາສີ
ເຖິງກະສັດແມ່ນອຸບັດໃນສະກຸນອັນສູງຍິ່ງ
ໄດ້ຣາດຊະສົມບັດແລ້ວ ແຕ່ມີປັນຍາຊາມ
ຈະດຳຣົງພະຊົນຊີບຢູ່ດ້ວຍໂພຄະແມ່ນທັງປວງບໍ່ໄດ້

[໖໓] ປັນຍາທີ່ນັ້ນເປັນເຄື່ອງພິຈາລະນາເລື້ອງທີ່ໄດ້ຟັງ
ປັນຍາເປັນເຫດໃຫ້ກຽດຕິຍົດຊື່ສຽງຈະເລີນ
ນໍຣະຊົນໃນໂລກນີ້ປະກອບດ້ວຍປັນຍາແລ້ວ
ແມ່ນເມື່ອເກີດທຸກກໍປະສົບສຸກໄດ້

[໖໔] ສ່ວນຄົນບາງຄົນບໍ່ຕັ້ງໃຈຟັງດ້ວຍດີ
ບໍ່ອາໄສທ່ານຜູ້ເປັນພະຫູສູດ ເຊິ່ງຕັ້ງຢູ່ໃນທຳ
ບໍ່ໄຕ່ຕອງເຫດຜົນ ຍ່ອມບໍ່ໄດ້ລຸເຖິງປັນຍາ

[໖໕] ອັນໜຶ່ງ ຜູ້ໃດຮູ້ຈັກຈຳແນກທຳ ລຸກຂຶ້ນໃນການທີ່ເໝາະສົມ
ບໍ່ກຽດຄ້ານ ບາກບັ່ນຕາມການເວລາ ຜົນງານຂອງຜູ້ນັ້ນຍ່ອມສຳເລັດ

[໖໖] ປະໂຫຍດຂອງບຸກຄົນຜູ້ບໍ່ແມ່ນເປັນບໍ່ເກີດແຫ່ງສິນ
ຜູ້ຄົບຫາບຸກຄົນຜູ້ບໍ່ແມ່ນບໍ່ເກີດແຫ່ງສິນ

ຜູ້ມີປົກກະຕິເບື່ອໜ່າຍການເຮັດວຽກງານ ຍ່ອມບໍ່ມີຜົນໂດຍຊອບ

[໓໗] ສ່ວນປະໂຫຍດຂອງບຸກຄົນຜູ້ປະກອບທຳອັນເປັນພາຍໃນ
ຜູ້ຄົບຫາບຸກຄົນຜູ້ເປັນບໍ່ເກີດແຕ່ງສົນເຊັ່ນນັ້ນ
ມີປົກກະຕິບໍ່ເບື່ອໜ່າຍການເຮັດວຽກງານ ຍ່ອມມີຜົນໂດຍຊອບ

[໓໘] ຂໍເດຊະສະເດັດພໍ່ ຂໍສະເດັດພໍ່ຈົ່ງຊົງໃຝ່ຫາປັນຍາ
ຄືການຕາມປະກອບຄວາມພຽນໃນເຫດທີ່ຄວນປະກອບ
ແລະໃຝ່ຫາການອະນຸລັກຊັບທີ່ຊົງລວບລວມໄວ້ທັງ ໔ ຢ່າງນັ້ນເທີ້ນ
ຢ່າຊົງທຳລາຍຊັບດ້ວຍເຫດອັນບໍ່ສົມຄວນເລີຍ
ຍ້ອນຄົນມີປັນຍາຊາມຍ່ອມລົ່ມຈົມ
ເໝືອນເຮືອນໄມ້ອໍ້ ຍ້ອນການເຮັດອັນບໍ່ສົມຄວນ

(ພຣະໂພທິສັດພັນນາກຳລັງ ໕ ປະການນີ້ແລ້ວ ຍົກກຳລັງຄືປັນຍາຂຶ້ນຂາບທູນແດ່ ພຣະຣາຊາ ອີກວ່າ)

[໓໙] ຂໍເດຊະພຣະມະຫາຣາດຜູ້ເປັນກະສັດ ຂໍພຣະອົງໂຜດ
ຊົງປະພຶດທຳໃນພຣະຣາດຊະມານດາແລະພຣະຣາດຊະບິດາເທີ້ນ
ເມື່ອຊົງປະພຶດທຳໃນໂລກນີ້ແລ້ວ ຈັກສະເດັດສູ່ສະຫວັນ

[໔໐] ຂໍເດຊະພຣະມະຫາຣາດຜູ້ເປັນກະສັດ ຂໍພຣະອົງໂຜດ
ຊົງປະພຶດທຳໃນພຣະໂອຣົດແລະພຣະຊາຍາເທີ້ນ
ເມື່ອຊົງປະພຶດທຳໃນໂລກນີ້ແລ້ວ ຈັກສະເດັດສູ່ສະຫວັນ

[໔໑] ຂໍເດຊະພຣະມະຫາຣາດຜູ້ເປັນກະສັດ ຂໍພຣະອົງໂຜດ
ຊົງປະພຶດທຳໃນໝູ່ມິດແລະອຳມາດເທີ້ນ
ເມື່ອຊົງປະພຶດທຳໃນໂລກນີ້ແລ້ວ ຈັກສະເດັດສູ່ສະຫວັນ

[໔໒] ຂໍເດຊະພຣະມະຫາຣາດຜູ້ເປັນກະສັດ ຂໍພຣະອົງໂຜດ
ຊົງປະພຶດທຳໃນຣາດຊະພາຫະນະແລະພົນນິກາຍເທີ້ນ
ເມື່ອຊົງປະພຶດທຳໃນໂລກນີ້ແລ້ວ ຈັກສະເດັດສູ່ສະຫວັນ

[໔໓] ຂໍເດຊະພຣະມະຫາຣາດຜູ້ເປັນກະສັດ ຂໍພຣະອົງໂຜດ
ຊົງປະພຶດທຳໃນຊາວບ້ານແລະຊາວນິຄົມເທີ້ນ
ເມື່ອຊົງປະພຶດທຳໃນໂລກນີ້ແລ້ວ ຈັກສະເດັດສູ່ສະຫວັນ

[໔໔] ຂໍເດຊະພຣະມະຫາຣາດຜູ້ເປັນກະສັດ ຂໍພຣະອົງໂຜດ
ຊົງປະພຶດທຳໃນຊາວແຄວ້ນແລະຊາວຊົນນະບົດເທີ້ນ
ເມື່ອຊົງປະພຶດທຳໃນໂລກນີ້ແລ້ວ ຈັກສະເດັດສູ່ສະຫວັນ

[໔໕] ຂໍເດຊະພຣະມະຫາຣາດຜູ້ເປັນກະສັດ ຂໍພຣະອົງໂຜດ
ຊົງປະພຶດທຳໃນສະມະນະແລະພາມທັງຫຼາຍເທີ້ນ
ເມື່ອຊົງປະພຶດທຳໃນໂລກນີ້ແລ້ວ ຈັກສະເດັດສູ່ສະຫວັນ

[໔໖] ຂໍເດຊະພຣະມະຫາຣາດຜູ້ເປັນກະສັດ ຂໍພຣະອົງໂຜດ
ຊົງປະພຶດທຳໃນໝູ່ເນື້ອແລະສັດປີກທັງຫຼາຍເທີ້ນ
ເມື່ອຊົງປະພຶດທຳໃນໂລກນີ້ແລ້ວ ຈັກສະເດັດສູ່ສະຫວັນ

[໔໗] ຂໍເດຊະພຣະມະຫາຣາດຜູ້ເປັນກະສັດ
ຂໍພຣະອົງໂຜດຊົງປະພຶດທຳ
ຍ້ອນທຳທີ່ບຸກຄົນປະພຶດແລ້ວນຳຄວາມສຸກມາໃຫ້
ເມື່ອຊົງປະພຶດທຳໃນໂລກນີ້ແລ້ວ ຈັກສະເດັດສູ່ສະຫວັນ

[໔໘] ຂໍເດຊະພຣະມະຫາຣາດ ຂໍພຣະອົງໂຜດຊົງປະພຶດທຳເທີ້ນ
ຍ້ອນເທວະດາພ້ອມທັງພຣະອິນແລະພຣະພົມ
ເຖິງທິບພະສະຖານໄດ້ດ້ວຍທຳທີ່ຕົນປະພຶດດີແລ້ວ
ຂໍເດຊະ ຂໍພຣະອົງຢ່າຊົງຜະໝາດໃນທຳເລີຍ

(ພຣະໂພທິສັດກ່າວຄາຖາສະແດງຈະຣິຍະທຳ ໑໐ ປະການນີ້ແລ້ວຈຶ່ງໂອວາດໃຫ້ຍິ່ງຂຶ້ນໄປວ່າ)

[໔໙] ຂໍ້ຄວາມເຫຼົ່ານັ້ນທີ່ຂ້າພຣະອົງກ່າວແກ້ໃນບັນຫາຂອງສະເດັດພໍ່
ນັ້ນແລເປັນວັດຕະບົດ
ຂໍ້ນີ້ເປັນອະນຸສາສະນີສຳລັບສະເດັດພໍ່
ຂໍສະເດັດພໍ່ໂຜດຊົງຄົບຫາຄົນມີປັນຍາ ຈຶ່ງຊົງເປັນຜູ້ມີກັນລະຍານະທຳ
ຊົງຮູ້ຄວາມຂໍ້ນັ້ນດ້ວຍພຣະອົງເອງແລ້ວ
ໂຜດຊົງປະຕິບັດໃຫ້ຄົບຖ້ວນດ້ວຍເທີ້ນ

**ເຕສະກຸນະຊາດົກທີ ໑ ຈົບ**

# ໘. ສະຣະພັງຄະຊາດົກ (໕໔໘)
## ວ່າດ້ວຍສະຣະພັງຄະດາບົດແກ້ບັນຫາ

(ອະນຸສິດສະດາບົດຖືໝໍ້ຈະໄປຕັກນໍ້າໄດ້ພົບພຣະຣາຊາ ໓ ພຣະອົງ ຈຶ່ງທູນຖາມວ່າ)

[໕໐] ທ່ານທັງຫຼາຍເປັນຜູ້ໃດກັນນໍ ປະດັບເຄື່ອງອະລັງການ
ສວມໃສ່ຕຸ້ມຫູ ນຸ່ງຫົ່ມຮຽບຮ້ອຍ ເນັບພຣະຂັນມີດ້າມປະດັບ
ດ້ວຍແກ້ວໄພທູນແລະແກ້ວມຸກດາ ຢືນຢູ່ເທິງລົດຢ່າງອົງອາດ
ໃນມະນຸດໂລກເຂົາຮູ້ຈັກພວກທ່ານວ່າແນວໃດນໍ?

(ໃນພຣະຣາຊາທັງ ໓ ອົງ ພຣະເຈົ້າອັດຖະກະຕັດກັບທ່ານອະນຸສິດສະດາບົດວ່າ)

[໕໑] ຂ້າພະເຈົ້າຊື່ອັດຖະກະ ທ່ານຜູ້ນີ້ຄືພຣະເຈົ້າພີມະຣົດ
ສ່ວນທ່ານຜູ້ນີ້ຄືພຣະເຈົ້າກາລິງຄະຜູ້ມີພຣະກຽດຕິຍົດຣະບືໄປທົ່ວ
ພວກຂ້າພະເຈົ້າມາສູ່ບ່ອນນີ້ເພື່ອຈະຢ້ຽມລືສີທັງຫຼາຍ
ຜູ້ມີຄວາມສັງລວມເປັນອັນດີ ແລະເພື່ອທີ່ຈະຖາມບັນຫາ

(ອະນຸສິດສະດາບົດປະຕິສັນຖານກັບພຣະຣາຊາແລ້ວ ຂາບທູນທ້າວສັກກະເທວະຣາດຜູ້ສະເດັດມາ ຢ້ຽມວ່າ)

[໕໘] ທ່ານຢືນຢູ່ກາງຫາວປານວ່າພຣະຈັນເພັງ
ລອຍເດ່ນຢູ່ທ່າມກາງເວຫາໃນວັນຂຶ້ນ ໑໕ ຄໍ່າ
ທ່ານຜູ້ມີຄຸນໜ້າບູຊາ ຂ້າພະເຈົ້າຂໍຖາມທ່ານຜູ້ມີອານຸພາບຫຼາຍວ່າ
ໃນມະນຸດໂລກເຂົາຮູ້ຈັກທ່ານວ່າແນວໃດ?

(ທ້າວສັກກະເທວະຣາດສະດັບດັ່ງນັ້ນແລ້ວຈຶ່ງຕັດວ່າ)

[໕໓] ທ່ານຜູ້ໃດໃນເທວະໂລກເຂົາຮຽກກັນວ່າ ສຸຊໍາບໍດີ
ທ່ານຜູ້ນັ້ນໃນມະນຸດໂລກເຂົາຮຽກກັນວ່າ ມັກຄະວານ
ຂ້າພະເຈົ້ານັ້ນເປັນເທບຣາຊາມາເຖິງທີ່ນີ້ໃນວັນນີ້
ເພື່ອຈະຢ້ຽມລືສີທັງຫຼາຍຜູ້ມີຄວາມສັງລວມເປັນອັນດີ

(ທ້າວສັກກະເທວະຣາດສະເດັດລົງແລ້ວເຂົ້າໄປຫາໝູ່ລືສີ ຢືນປະຄອງອັນຊະລີໄຫວ້ຢູ່ຕັດວ່າ)

[໕໔] ລືສີຂອງພວກເຮົາມີລິດຫຼາຍ ປະກອບດ້ວຍຄຸນຄືລິດ

ຜາກົດໃນທີ່ໄກ ຂ້າພະເຈົ້າມີຈິດເຫຼື້ອມໃສ
ຂໍນະມັດສະການພຣະຜູ້ເປັນເຈົ້າຜູ້ປະເສີດກວ່າມະນຸດທັງຫຼາຍໃນມະນຸດໂລກນີ້

(ຕໍ່ມາອະນຸສິດສະດາບົດເຫັນທ້າວສັກກະເທວະຣາດປະທັບນັ່ງໃຕ້ຮົ່ມຂອງໝູ່ລືສີຈຶ່ງຂາບທູນວ່າ)

[໕໕] ກິ່ນຂອງລືສີຜູ້ທີ່ບວດມານານຍ່ອມອອກຈາກກາຍຟຸ້ງໄປຕາມລົມ
ຂໍຖວາຍພຣະພອນ ທ້າວສະຫັດສະໄນເທວະຣາດ
ຂໍມະຫາບໍພິດສະເດັດຖອຍໄປຈາກບ່ອນນີ້
ຍ້ອນກິ່ນຂອງລືສີທັງຫຼາຍບໍ່ສະອາດ

(ທ້າວສັກກະເທວະຣາດຕັດວ່າ)

[໕໖] ກິ່ນຂອງລືສີຜູ້ທີ່ບວດມານານ
ຂໍຈົ່ງອອກຈາກກາຍຟຸ້ງໄປຕາມລົມເທີ້ນ
ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້າພະເຈົ້າທັງຫຼາຍຈຳນົງຫວັງກິ່ນນັ້ນ
ດັ່ງພວງບຸບຜະຊາດອັນວິຈິດມີກິ່ນຫອມ
ຍ້ອນເທວະດາທັງຫຼາຍບໍ່ໄດ້ມີຄວາມສຳຄັນກິ່ນນີ້ວ່າປະຕິກູນ

(ອະນຸສິດສະດາບົດລຸກຈາກອາສະນະ ຂໍໂອກາດກັບໝູ່ລືສີ ກ່າວວ່າ)

[໕໗] ທ້າວມັກຄະວານ ສຸຊຳບໍດີເທວະຣາດ ອົງປຸຣິນທະທະຈອມເທບ
ຜູ້ເປັນໃຫຍ່ກວ່າພູດພຣະອົງນັ້ນ ຊົງພຣະຍົດ ຍ່ຳຍີໝູ່ອະສູນ
ຊົງຖ້າໂອກາດເພື່ອຈະຕັດຖາມບັນຫາ

[໕໘] ບັນດາລືສີເຫຼົ່ານີ້ຜູ້ເປັນບັນດິດຢູ່ໃນບ່ອນນີ້
ໃຜນໍຖືກຖາມແລ້ວຈັກພະຍາກອນບັນຫາອັນລະອຽດສຸຂຸມ
ຂອງພຣະຣາຊາຜູ້ເປັນໃຫຍ່ກວ່າມະນຸດທັງ ໔ ພຣະອົງ
ແລະຂອງທ້າວວາສະວະຈອມເທບໄດ້

(ໝູ່ລືສີໄດ້ຟັງດັ່ງນັ້ນແລ້ວຈຶ່ງກ່າວແນະນຳວ່າ)

[໕໙] ລືສີຕົນນີ້ຊື່ສະຣະພັງຄະ ມີຕະບະ ເວັ້ນຈາກເມຖຸນທຳຕັ້ງແຕ່ເກີດ
ເປັນບຸດຂອງປຸໂຣຫິຕາຈານ ໄດ້ຮັບການເຝິກຝົນມາເປັນອັນດີ
ທ່ານຈັກພະຍາກອນບັນຫາທັງຫຼາຍຂອງພຣະຣາຊາເຫຼົ່ານັ້ນໄດ້

(ອະນຸສິດສະດາບົດຍອມຮັບໄຫວ້ສະຣະພັງຄະດາບົດແລ້ວເມື່ອຈະໂອວາດ ຈຶ່ງກ່າວວ່າ)

[໗໐] ທ່ານໂກນທັນຍະ ນິມົນທ່ານພະຍາກອນບັນຫາທັງຫຼາຍເທີ້ນ
ລືສີທັງຫຼາຍຜູ້ເປັນຄົນດີຂໍຮ້ອງທ່ານ
ທ່ານໂກນທັນຍະ ພາຣະນີ້ຍ່ອມມາເຖິງທ່ານຜູ້ຈະເລີນດ້ວຍປັນຍາ
ນີ້ເປັນທຳມະດາໃນມະນຸດທັງຫຼາຍ

(ຕໍ່ມາພຣະມະຫາບຸຣຸດສະຣະພັງຄະດາບົດເມື່ອໃຫ້ໂອກາດ ຈຶ່ງກ່າວວ່າ)

[໗໑] ມະຫາບໍພິດຜູ້ຈະເລີນທັງຫຼາຍ ອາດຕະມາໃຫ້ໂອກາດ
ຂໍເຊີນຕັດຖາມບັນຫາແນວໃດແນວໜຶ່ງຕາມພຣະທະໄທປາຖະໜາເທີ້ນ
ເພາະອາດຕະມາຮູ້ຈັກທັງໂລກນີ້ແລະໂລກໜ້າດ້ວຍຕົນເອງ
ຈັກພະຍາກອນບັນຫາຂໍ້ນັ້ນ ໆ ຖວາຍມະຫາບໍພິດ

(ພຣະສາດສະດາເມື່ອຈະຊີ້ງປະກາດຄວາມຂໍ້ນັ້ນ ຈຶ່ງຕັດວ່າ)

[໗໒] ລຳດັບນັ້ນ ທ້າວມັກຄະວານສັກກະເທວະຣາດ ອີງປຸຣິນທະທະຊີງເຫັນ
ປະໂຫຍດໄດ້ຕັດຖາມບັນຫາຂໍ້ທຳອິດຕາມທີ່ພຣະທະໄທປາຖະໜາວ່າ

[໗໓] ໃນການບາງເວລາ ບຸກຄົນຂ້າອັນໃດ ຈຶ່ງຈະບໍ່ເສົ້າໂສກ
ລືສີທັງຫຼາຍສັນເສີນການລະອັນໃດ
ບຸກຄົນຄວນອົດທົນຄຳຫຍາບຄາຍທີ່ໃຜໃນໂລກນີ້ກ່າວ
ນິມົນບອກເນື້ອຄວາມຂໍ້ນັ້ນແກ່ຂ້ານ້ອຍເທີ້ນ ທ່ານໂກນທັນຍະ

(ຕໍ່ແຕ່ນັ້ນພຣະມະຫາສັດສະຣະພັງຄະດາບົດເມື່ອຈະຕອບບັນຫາ ຈຶ່ງກ່າວວ່າ)

[໗໔] ໃນການບາງເວລາ ບຸກຄົນຂ້າຄວາມໂກດໄດ້ຈຶ່ງບໍ່ເສົ້າໂສກ
ລືສີທັງຫຼາຍສັນເສີນການລະຄວາມລົບຫຼູ່
ບຸກຄົນຄວນອົດທົນຕໍ່ຄຳຫຍາບຄາຍທີ່ທຸກຄົນກ່າວ
ສັດຕະບຸຣຸດທັງຫຼາຍກ່າວຄວາມອົດທົນນັ້ນວ່າ ປະເສີດ

(ທ້າວສັກກະຕັດວ່າ)

[໗໕] ຄຳຂອງບຸກຄົນທັງ ໔ ຈຳພວກ ຄື
ຄົນທີ່ສະເໝີກັນ ໑ ຄົນທີ່ປະເສີດກວ່າ ໑
ບຸກຄົນອາດຈະອົດກັ້ນໄດ້
ແຕ່ບຸກຄົນຈະເພິ່ງອົດທົນຄຳເວົ້າຂອງຄົນທີ່ຊົ່ວກວ່າໄດ້ແນວໃດນໍ
ນິມົນບອກເນື້ອຄວາມຂໍ້ນັ້ນແກ່ຂ້ານ້ອຍເທີ້ນ ທ່ານໂກນທັນຍະ

(ສະຣະພັງຄະດາບົດຕອບວ່າ)

[໖໖] ແທ້ຈິງ ບຸກຄົນທົນຄຳເວົ້າຂອງຄົນປະເສີດກວ່າໄດ້
ຍ້ອນຄວາມຢ້ານ
ອົດທົນຄຳເວົ້າຂອງຄົນສະເໝີກັນໄດ້ຍ້ອນການແຂ່ງຂັນເປັນເຫດ
ແຕ່ຜູ້ໃດເພິ່ງອົດທົນຄຳເວົ້າຂອງຄົນທີ່ຊົ່ວກວ່າໃນໂລກນີ້ໄດ້
ຄວາມອົດທົນນັ້ນຂອງບຸກຄົນນັ້ນສັດຕະບຸຣຸດກ່າວວ່າ ປະເສີດ

(ຕໍ່ມາພຣະມະຫາສັດສະຣະພັງຄະດາບົດຕອບທ້າວສັກກະແລ້ວ ເມື່ອຈະປະກາດສະພາບທີ່ສັດທັງຫຼາຍເປັນຜູ້ປະເສີດເປັນຕົ້ນ ເປັນສະພາບທີ່ຮູ້ໄດ້ຍາກ ດ້ວຍອາການພຽງເຫັນຮູບຮ່າງ ເວັ້ນແຕ່ການຢູ່ຮ່ວມກັນ ຈຶ່ງກ່າວຄາຖາວ່າ)

[໖໗] ສະພາວະທີ່ປົກປິດໄວ້ດ້ວຍອິລິຍາບົດທັງ ໔
ບຸກຄົນຈະຮູ້ໄດ້ແນວໃດວ່າ ປະເສີດກວ່າ ສະເໝີກັນ ຫຼື ຊົ່ວກວ່າ
ຍ້ອນວ່າສັດຕະບຸຣຸດທັງຫຼາຍຍ່ອມທ່ຽວໄປດ້ວຍສະພາວະທີ່ຜິດຮູບ
ຍ້ອນເຫດນັ້ນ ບຸກຄົນຄວນອົດທົນຄຳເວົ້າຂອງຄົນທັງປວງ

(ເມື່ອທ້າວສັກກະໝົດຄວາມສົງໄສ ພຣະມະຫາສັດສະຣະພັງຄະດາບົດຈຶ່ງກ່າວຄາຖາ ທູລວ່າ)

[໖໘] ສັດຕະບຸຣຸດຜູ້ມີຂັນຕິເພິ່ງໄດ້ປະໂຫຍດອັນໃດ
ປະໂຫຍດນັ້ນເສນາແມ່ນໝູ່ໃຫຍ່ພ້ອມດ້ວຍພຣະຣາຊາຮົບຢູ່ກໍບໍ່ເພິ່ງໄດ້
ເວນທັງຫຼາຍຍ່ອມສະງົບຣະງັບໄດ້ດ້ວຍກຳລັງແຫ່ງຂັນຕິ

(ຕໍ່ມາທ້າວສັກກະເທວະຣາດ ຊົງຮູ້ອັດທະຍາໄສຂອງພຣະຣາຊາທັງຫຼາຍແລ້ວ ຈຶ່ງຕັດຖາມຄວາມສົງໄສຂອງພຣະຣາຊາເຫຼົ່ານັ້ນວ່າ)

[໖໙] ຂ້ານ້ອຍຂໍອະນຸໂມທະນາຄຳສຸພາສິດຂອງພຣະຜູ້ເປັນເຈົ້າ
ຂ້ານ້ອຍຂໍຖາມບັນຫາຂໍ້ອື່ນກັບພຣະຜູ້ເປັນເຈົ້າ
ຂໍພຣະຜູ້ເປັນເຈົ້າໂຜດກ່າວແກ້ບັນຫານັ້ນ
ຂໍພຣະຜູ້ເປັນເຈົ້າໂຜດບອກເຖິງຄະຕິຂອງພຣະຣາຊາທັງຫຼາຍ
ຜູ້ທຳບາບກຳອັນຮ້າຍແຮງ ຄື
ພຣະເຈົ້າທັນທະກີ ໑ ພຣະເຈົ້ານາລິກີຣະ ໑
ພຣະເຈົ້າອັດຊຸນະ ໑ ພຣະເຈົ້າກະລາພຸ ໑
ພຣະຣາຊາທັງຫຼາຍເຫຼົ່ານັ້ນບຽດບຽນລືສີ
ພາກັນໄປເກີດໃນບ່ອນໃດ?

(ພຣະມະຫາສັດສະຣະພັງຄະດາບົດຕອບບັນຫາຂອງທ້າວສັກກະວ່າ)

[໗໐] ກໍພຣະເຈົ້າທັນທະກີໄດ້ລົງໂທດກີສະວັດສະດາບົດ ເປັນຜູ້ຕັດມູນຮາກ
ພ້ອມທັງອານາປະຊາຣາດມົກໄໝ້ຢູ່ໃນນະຮົກຊື່ກຸກກຸລະ
ຖ່ານໄຟທີ່ປາສະຈາກແປວໄຟຕົກຕ້ອງກາຍຂອງພຣະອົງ

[໗໑] ພຣະຣາຊາພຣະອົງໃດໄດ້ຊົງບຽດບຽນບັນພະຊິດທັງຫຼາຍ
ຜູ້ສັງລວມ ຜູ້ກ່າວທຳ ຜູ້ສະງົບ ບໍ່ປະທຸດສະຮ້າຍ
ພຣະຣາຊາພຣະອົງນັ້ນຊົງພະນາມວ່າ ພຣະເຈົ້ານາລິກີຣະ
ໝາທັງຫຼາຍພາກັນຫຸ້ມກັດກິນ ຊົງດີ້ນຣົນຢູ່ໃນປະຣະໂລກ

[໗໒] ອັນໜຶ່ງ ພຣະເຈົ້າອັດຊຸນະຊົງຕົກນະຮົກຊື່ສັດຕິສູລະ
ຊົງມີພຣະສຽນຫ້ອຍລົງ ພຣະບາດຊີ້ຂຶ້ນເບື້ອງເທິງ
ເພາະຊົງບຽດບຽນພຣະອັງຄີຣະສະໂຄຕະມະລືສີຜູ້ມີຂັນຕິ
ມີຕະບະ ປະພຶດພົມມະຈັນມາຊ້ານານ

[໗໓] ອັນໜຶ່ງ ພຣະຣາຊາພຣະອົງໃດໄດ້ຊົງຕັດບັນພະຊິດຜູ້ກ່າວຂັນຕິ
ຜູ້ສະງົບ ບໍ່ປະທຸດສະຮ້າຍ ຂາດອອກເປັນທ່ອນ ໆ
ພຣະຣາຊາພຣະອົງນັ້ນຊົງພະນາມວ່າພຣະເຈົ້າກະລາພຸ
ຕົກອະເວຈີມະຫານະຮົກເຊິ່ງມີຄວາມຮ້ອນຮ້າຍແຮງ
ມີເວທະນາເຜັດຮ້ອນ ທຸກທໍລະມານ ມົກໄໝ້ຢູ່

[໗໔] ບັນດິດໄດ້ຟັງເລື້ອງນະຮົກເຫຼົ່ານີ້
ແລະນະຮົກເຫຼົ່າອື່ນທີ່ຊົ່ວຊ້າກວ່ານີ້ ຢູ່ບ່ອນນີ້ແລ້ວ
ເພິ່ງປະພຶດທຳໃນສະມະນະແລະພາມທັງຫຼາຍ
ຜູ້ກະທຳແນວນີ້ຍ່ອມເຂົ້າເຖິງແດນສະຫວັນ

(ທ້າວສັກກະຕັດຖາມບັນຫາ ໔ ຂໍ້ທີ່ເຫຼືອວ່າ)

[໗໕] ຂ້ານ້ອຍຂໍອະນຸໂມທະນາຄຳສຸພາສິດຂອງພຣະຜູ້ເປັນເຈົ້າ
ແຕ່ຂ້ານ້ອຍຂໍຖາມບັນຫາຂໍ້ອື່ນກັບພຣະຜູ້ເປັນເຈົ້າ
ຂໍພຣະຜູ້ເປັນເຈົ້າໂຜດກ່າວແກ້ບັນຫານັ້ນ
ບັນດິດຮຽກຄົນເຊັ່ນໃດວ່າ ມີສີນ
ຮຽກຄົນເຊັ່ນໃດວ່າ ມີປັນຍາ

ຮຽກຄົນເຊັ່ນໃດວ່າ ສັດຕະບຸຣຸດ
ສິຣິຍ່ອມບໍ່ປະປົນແນວໃດນໍ?

(ພຣະມະຫາສັດສະຣະພັງຄະດາບົດຕອບບັນຫາຂອງທ້າວສັກກະວ່າ)

[໗໖] ບຸກຄົນໃດໃນໂລກນີ້ ສັງລວມກາຍ ວາຈາ ໃຈ
ບໍ່ເຮັດບາບກຳອັນໃດ ບໍ່ເວົ້າເຫຼາະແຫຼະຍ້ອນເຫດແຫ່ງຕົນ
ບັນດິດຮຽກຄົນເຊັ່ນນັ້ນວ່າ ຜູ້ມີສິນ

[໗໗] ບຸກຄົນໃດຄິດບັນຫາທີ່ເລິກເຊິ່ງໄດ້ດ້ວຍໃຈ
ບໍ່ເຮັດກຳອັນຫຍາບຊ້າເຊິ່ງຫາປະໂຫຍດເກື້ອກູນບໍ່ໄດ້
ບໍ່ຕັດຮອນປະໂຫຍດທີ່ມາເຖິງຕາມການໃຫ້ເສຍໄປ
ບັນດິດຮຽກຄົນເຊັ່ນນັ້ນວ່າ ຜູ້ມີປັນຍາ

[໗໘] ບຸກຄົນໃດເປັນຄົນກະຕັນຍູກະຕະເວທີ ເປັນປາດ
ມີກັນລະຍານະມິດ ແລະມີຄວາມພັກດີໝັ້ນຄົງ
ຊ່ອຍເຮັດກິດຂອງມິດທີ່ຕົກຍາກດ້ວຍຄວາມເຕັມໃຈ
ບັນດິດຮຽກຄົນເຊັ່ນນັ້ນວ່າ ສັດຕະບຸຣຸດ

[໗໙] ບຸກຄົນໃດປະກອບດ້ວຍຄຸນສົມບັດທັງປວງເຫຼົ່ານີ້
ມີສັດທາ ອ່ອນໂຍນ ຈຳແນກແຈກທານດ້ວຍດີ
ຮູ້ຄວາມປະສົງຂອງຜູ້ຂໍ ສິຣິຍ່ອມບໍ່ປະປົນແນວນັ້ນ
ຜູ້ມີປິກກະຕິສົງເຄາະ ມີວາຈາອ່ອນຫວານ ສະຫຼະສະຫຼວຍ

(ທ້າວສັກກະຕັດວ່າ)

[໘໐] ຂ້ານ້ອຍຂໍອະນຸໂມທະນາຄຳສຸພາສິດຂອງພຣະຜູ້ເປັນເຈົ້າ
ແຕ່ຂ້ານ້ອຍຂໍຖາມບັນຫາຂໍ້ອື່ນກັບພຣະຜູ້ເປັນເຈົ້າ
ຂໍພຣະຜູ້ເປັນເຈົ້າໂຜດກ່າວແກ້ບັນຫານັ້ນ
ສິນ ໑ ສິຣິ ໑ ທຳຂອງສັດຕະບຸຣຸດ ໑ ປັນຍາ ໑
ບັນດິດກ່າວຂໍ້ໃດວ່າ ປະເສີດກວ່າ?

(ພຣະມະຫາສັດສະຣະພັງຄະດາບົດຕອບວ່າ)

[໘໑] ທ່ານຜູ້ສະຫຼາດທັງຫຼາຍກ່າວວ່າ ປັນຍາປະເສີດທີ່ສຸດ

ດັ່ງດວງຈັນຣາຊາແຫ່ງນັກຂະສັດປະເສີດກວ່າດວງດາວທັງຫຼາຍ
ສິນ ສິຣິ ແລະແມ່ນທຳຂອງສັດຕະບຸຣຸດຍ່ອມເປັນໄປຕາມບຸກຄົນຜູ້ມີປັນຍາ

(ທ້າວສັກກະຕັດວ່າ)

[໗໔] ຂ້ານ້ອຍຂໍອະນຸໂມທະນາຄຳສຸພາສິດຂອງພຣະຜູ້ເປັນເຈົ້າ
ແຕ່ຂ້ານ້ອຍຂໍຖາມບັນຫາຂໍ້ອື່ນກັບພຣະຜູ້ເປັນເຈົ້າ
ຂໍພຣະຜູ້ເປັນເຈົ້າໂຜດກ່າວແກ້ບັນຫານັ້ນ
ບຸກຄົນໃນໂລກນີ້ເຮັດແນວໃດ ເຮັດກຳອັນໃດ
ປະພຶດກຳອັນໃດ ຄົບຫາຄົນແນວໃດ ຈຶ່ງຈະໄດ້ປັນຍາ
ບັດນີ້ ຂໍພຣະຜູ້ເປັນເຈົ້າໂຜດບອກປະຕິປະທາແຫ່ງປັນຍາວ່າ
ບຸກຄົນເຮັດແນວໃດ ຈຶ່ງຈະຊື່ວ່າຜູ້ມີປັນຍາ

(ພຣະມະຫາສັດສະຣະພັງຄະດາບົດກ່າວວ່າ)

[໗໓] ບຸກຄົນຄວນຄົບຫາທ່ານຜູ້ຈະເລີນດ້ວຍປັນຍາ
ມີຄວາມຮູ້ລະອຽດລະອໍເປັນພະຫູສູດ
ຄວນສຶກສາຮ່ຳຮຽນ ສອບຖາມ ຟັງຄຳສຸພາສິດໂດຍເຄົາລົບ
ບຸກຄົນເຮັດແນວນີ້ ຈຶ່ງຈະຊື່ວ່າຜູ້ມີປັນຍາ

[໗໔] ທ່ານຜູ້ມີປັນຍາພິຈາລະນາເຫັນກາມມະຄຸນ
ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ແລະໂດຍຄວາມເປັນໂຣກ
ເມື່ອເຫັນແຈ້ງແນວນີ້ ຈຶ່ງລະຄວາມພໍໃຈໃນກາມທັງຫຼາຍ
ເຊິ່ງເປັນທຸກເປັນໄພອັນໃຫຍ່ຫຼວງສາໄດ້

[໗໕] ເຂົາປາສະຈາກຣາຄະແລ້ວ ເພິ່ງກຳຈັດໂທສະໄດ້
ຈະເລີນເມດຕາຈິດຫາປະມານບໍ່ໄດ້
ວາງອາດຍາໃນສັດທຸກຈຳພວກ
ເປັນຜູ້ບໍ່ຖືກນິນທາ ເຂົ້າເຖິງພົມສະຖານ

(ພຣະມະຫາສັດສະຣະພັງຄະດາບົດຮູ້ວ່າ ພຣະຣາຊາທັງ ໓ ພຣະອົງລະຄວາມກຳໜັດ ຍິນດີໃນປັນຈະກາມມະຄຸນໄດ້ແລ້ວ ຈຶ່ງກ່າວຄາຖາດ້ວຍອຳນາດຄວາມຣ່າເຣິງຂອງພຣະຣາຊາເຫຼົ່ານັ້ນວ່າ)

[໗໖] ຂໍຖວາຍພຣະພອນມະຫາບໍພິດອັດຖະກະ

ການສະເດັດມາຂອງພຣະອົງ ຂອງພຣະເຈົ້າພິມະຣົດ
ແລະຂອງພຣະເຈົ້າກາລິງຄະຜູ້ມີພຣະຍົດຣະບືໄປທົ່ວ
ໄດ້ມີຄວາມສຳເລັດຢ່າງໃຫຍ່ຫຼວງ
ທຸກພຣະອົງຊົງລະການຣາຄະໄດ້ແລ້ວ

(ພຣະຣາຊາທັງຫຼາຍຊົງຊົມເຊີຍພຣະມະຫາສັດສະຣະພັງຄະດາບົດວ່າ)

[໙໗] ພຣະຜູ້ເປັນເຈົ້າຮູ້ຈິດຂອງຜູ້ອື່ນວ່າ ຂ້ານ້ອຍທຸກຄົນລະການຣາຄະໄດ້ແລ້ວ
ຂໍ້ນັ້ນເປັນຈິງຢ່າງນັ້ນ
ຂໍພຣະຜູ້ເປັນເຈົ້າຈົ່ງກະທຳໂອກາດເພື່ອອະນຸເຄາະ
ໂດຍປະການທີ່ຂ້ານ້ອຍທຸກຄົນຈະບັນລຸເຖິງຄະຕິຂອງພຣະຜູ້ເປັນເຈົ້າເທີ້ນ

(ພຣະມະຫາສັດສະຣະພັງຄະດາບົດໃຫ້ໂອກາດແກ່ພຣະຣາຊາທັງ ໗ ພຣະອົງວ່າ)

[໙໙] ອາດຕະມາຈະກະທຳໂອກາດເພື່ອອະນຸເຄາະ
ຍ້ອນມະຫາບໍພິດທັງຫຼາຍຊົງລະການຣາຄະໄດ້ແລ້ວຢ່າງແທ້ຈິງ
ຂໍມະຫາບໍພິດທັງຫຼາຍຊົງແຜ່ປີຕິທີ່ໄພບູນໃຫ້ແຜ່ຊ່ານໄປທົ່ວພຣະວໍຣະກາຍ
ໂດຍປະການທີ່ຈະບັນລຸເຖິງຄະຕິຂອງອາດຕະມາເທີ້ນ

(ພຣະຣາຊາເຫຼົ່ານັ້ນເມື່ອຈະຊົງຍອມຮັບ ຈຶ່ງໄດ້ຕັດວ່າ)

[໙໘] ທ່ານຜູ້ມີປັນຍາພຽງດັ່ງແຜ່ນດິນ ພຣະຜູ້ເປັນເຈົ້າຈະກ່າວຄຳໃດ
ຂ້ານ້ອຍທັງຫຼາຍຈະທຳຕາມຄຳພ່ຳສອນຂອງພຣະຜູ້ເປັນເຈົ້ານັ້ນທຸກຢ່າງ
ຈະແຜ່ປີຕິທີ່ໄພບູນໄປທົ່ວກາຍ
ໂດຍປະການທີ່ຈະບັນລຸເຖິງຄະຕິຂອງພຣະຜູ້ເປັນເຈົ້າ

(ລຳດັບນັ້ນ ພຣະມະຫາສັດສະຣະພັງຄະດາບົດໃຫ້ພຣະຣາຊາເຫຼົ່ານັ້ນ ພ້ອມທັງພົນນິກາຍບວດ
ເມື່ອຈະສົ່ງໝູ່ລືສີໄປ ຈຶ່ງກ່າວວ່າ)

[໘໐] ທ່ານຜູ້ຈະເລີນທັງຫຼາຍ ພວກເຮົາກະທຳການບູຊາ
ກີສະວັດສະດາບົດແນວນີ້ແລ້ວ
ຂໍລືສີທັງຫຼາຍຜູ້ເປັນຄົນດີ ຈົ່ງໄປສູ່ບ່ອນຢູ່ຂອງຕົນເທີ້ນ
ທ່ານທັງຫຼາຍຈົ່ງຍິນດີໃນຊານ ມີຈິດຕັ້ງໝັ້ນໃນການທຸກເມື່ອ
ຄວາມຍິນດີນັ້ນເປັນຄຸນນະຊາດປະເສີດສຸດສຳລັບບັນພະຊິດ

(ພຣະສາດສະດາຊົງຮູ້ຄວາມນີ້ແລ້ວໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ)

[໗໑] ເມື່ອໄດ້ສະດັບຄາຖາເຊິ່ງປະກອບດ້ວຍປະໂຫຍດຢ່າງຍິ່ງ
ທີ່ລືສີຜູ້ເປັນບັນດິດກ່າວດີແລ້ວ ເທວະດາທັງຫຼາຍຜູ້ມີຍົດເຫຼົ່ານັ້ນ
ເກີດປີຕິແລະໂສມະນັດອະນຸໂມທະນາຢູ່ ໄດ້ພາກັນຫຼີກໄປສູ່ເທບບຸຣີ

[໗໘] ຄາຖາທີ່ລືສີຜູ້ເປັນບັນດິດກ່າວດີແລ້ວເຫຼົ່ານີ້
ມີອັດຖະແລະພະຍັນຊະນະອັນດີງາມ
ຜູ້ໃດຜູ້ໜຶ່ງເພິ່ງສະດັບຄາຖາເຫຼົ່ານັ້ນໃຫ້ເປັນປະໂຫຍດ
ເພິ່ງໄດ້ຄຸນວິເສດທັງເບື້ອງຕົ້ນແລະເບື້ອງປາຍ
ເມື່ອໄດ້ແລ້ວ ເພິ່ງບັນລຸສະຖານທີ່ທີ່ພະຍາມັດຈຸຣາດເບິ່ງບໍ່ເຫັນ

(ພຣະສາດສະດາ ເມື່ອຊົງຮວບຍອດເທດສະໜາດ້ວຍພຣະອະຣະຫັດແນວນີ້ແລ້ວ ປະກາດສັດຈະທັງຫຼາຍ ຊົງປະຊຸມຊາດົກວ່າ)

[໗໙] ສາລິດສະຣະດາບົດຄືສາລີບຸດ ເມນຖິດສະຣະດາບົດຄືກັດສະປະ
ປັບພະຕະດາບົດຄືອະນຸຣຸດທະ ເທວິນດາບົດຄືກັດຈາຍະນະ

[໘໐] ອະນຸສິດສະດາບົດຄືອານົນ ກີສະວັດສະດາບົດຄືໂກລິຕະ
ນາຣະທະດາບົດຄືອຸທາຍີເຖຣະ ບໍລິສັດທັງຫຼາຍຄືພຸດທະບໍລິສັດ
ສ່ວນສະຣະພັງຄະໂພທິສັດຄືເຮົາຕະຖາຄົດ
ທ່ານທັງຫຼາຍຈົ່ງຊົງຈຳຊາດົກໄວ້ຢ່າງນີ້ແລ

**ສະຣະພັງຄະຊາດົກທີ ໘ ຈົບ**

## ໙. ອະລຳພຸສາຊາດົກ (໕໒໓)
## ວ່າດ້ວຍເທບທິດາອະລຳພຸສາ

(ພຣະສາດສະດາເມື່ອຈະຊົງສະແດງເນື້ອຄວາມນັ້ນໃຫ້ແຈ່ມແຈ້ງ ຈຶ່ງຕັດວ່າ)

[໘໑] ຄັ້ງນັ້ນ ພຣະອິນຜູ້ເປັນໃຫຍ່ຊົງປາບປາມຂໍ້ວັດອະສູນ
ເຊິ່ງເປັນພຣະບິດາແຫ່ງເຫຼົ່າເທບພະບຸດຜູ້ມີໄຊ
ຊົງເລັງເຫັນອະລຳພຸສາເທບກັນຍາວ່າມີຄວາມສາມາດ
ໃນສຸທຳມາເທວະສະຖານແລ້ວຈຶ່ງມີເທວະໂອງການວ່າ

[໗໖]	ແມ່ນາງມິດສາເທບກັນຍາ ເທວະດາຊັ້ນດາວວະດຶງ
ພ້ອມທັງພຣະອິນກໍຮ້ອງແມ່ນາງ
ແມ່ນາງອະລຳພຸສາຜູ້ສາມາດຈະປະເລົ້າປະໂລມລືສີໄດ້
ແມ່ນາງຈຶ່ງໄປຫາອິສີສິງຄະດາບົດເທີ້ນ

(ທ້າວສັກກະຊົງພຣະບັນຊານາງອະລຳພຸສາແລ້ວຕັດວ່າ)

[໗໗]	ດາບົດອົງນີ້ເປັນຜູ້ມີຂໍ້ວັດ ປະພຶດພົມມະຈັນ
ຍິນດີຍິ່ງໃນນິບພານ ເປັນຜູ້ຈະເລີນດ້ວຍຄຸນນະທຳ
ຢ່າລ່ວງເລີຍພວກເຮົາໄປກ່ອນເລີຍ
ທ່ານຈຶ່ງກັ້ນທາງທີ່ຈະໄປສູ່ເທວະໂລກຂອງທ່ານໄວ້

(ນາງອະລຳພຸສາເທບກັນຍາໄດ້ຟັງພຣະຣາດຊະດຳຣັດດັ່ງນັ້ນ ຈຶ່ງຕັດວ່າ)

[໗໘]	ຂໍເດຊະພຣະເທວະຣາດ ພຣະອົງຊົງເຮັດຫຍັງຢູ່
ພຣະອົງຈຶ່ງຊົງເຫັນແຕ່ຂ້ານ້ອຍທໍ່ນັ້ນວ່າ
ແມ່ນາງຜູ້ສາມາດຈະປະເລົ້າປະໂລມລືສີໄດ້
ທ່ານຈຶ່ງໄປ ນາງເທບອັບປະສອນແມ່ນອື່ນກໍມີຢູ່

[໗໙]	ນາງເທບອັບປະສອນຜູ້ທັດທຽມກັບຂ້ານ້ອຍ
ແລະປະເສີດກວ່າຂ້ານ້ອຍ ໃນອະໂສກະນັນທະວັນກໍມີຢູ່
ຂໍວາຣະແຫ່ງການໄປຈຶ່ງມີແກ່ນາງເທບອັບປະສອນເຫຼົ່ານັ້ນເທີ້ນ
ແມ່ນນາງເທບອັບປະສອນເຫຼົ່ານັ້ນກໍຈຶ່ງໄປປະເລົ້າປະໂລມໄດ້ເທີ້ນ

(ທ້າວສັກກະເທວະຣາດໄດ້ຕັດວ່າ)

[໑໐໐]	ທ່ານເວົ້າຖືກຕ້ອງຢ່າງແທ້ຈິງ
ເຖິງນາງເທບອັບປະສອນເຫຼົ່າອື່ນທີ່ທັດທຽມກັບທ່ານ
ແລະປະເສີດກວ່າທ່ານໃນອະໂສກະນັນທະວັນກໍມີຢູ່

[໑໐໑]	ແມ່ນາງຜູ້ມີຄວາມງາມທົ່ວສັນພາງກາຍ
ແຕ່ນາງເທບອັບປະສອນເຫຼົ່ານັ້ນໄປແລ້ວ
ບໍ່ຮູ້ຈັກການບຳເລີຊາຍຢ່າງທີ່ທ່ານຮູ້

[໑໐໔]	ເຊີນໄປເທີ້ນ ແມ່ນາງຜູ້ມີຄວາມງາມ

ຍ້ອນທ່ານປະເສີດກວ່າຍິງທັງຫຼາຍ
ທ່ານຈັກໃຊ້ຮູບຮ່າງຜິວພັນຂອງທ່ານ
ນຳດາບົດມາສູ່ອຳນາດໄດ້

(ພຣະນາງອະລຳພຸສາໄດ້ຟັງດັ່ງນັ້ນແລ້ວ ຈຶ່ງຂາບທູນວ່າ)

[໑໐໓] ຂ້ານ້ອຍຖືກພຣະເທວະຣາດຊົງໃຊ້ຈະບໍ່ເຮັດກໍບໍ່ໄດ້
ແຕ່ຂ້ານ້ອຍຫວັ່ນເກງການທີ່ຈະປະເລົ້າປະໂລມໃຫ້ດາບົດນັ້ນຍິນດີ
ຍ້ອນທ່ານເປັນພາມ ມີເດດສູງສົ່ງ

[໑໐໔] ຊົນທັງຫຼາຍປະເລົ້າປະໂລມລືສີໃຫ້ຍິນດີແລ້ວຕົກນະຮົກ
ເຖິງສັງສາຣະວັດຍ້ອນຄວາມງົມງາຍມີຈຳນວນບໍ່ແມ່ນໜ້ອຍ
ຍ້ອນເຫດນັ້ນ ຂ້ານ້ອຍຈຶ່ງຂົນພອງສະຍອງເກົ້າ

(ພຣະສາດສະດາຕັດວ່າ)

[໑໐໕] ອະລຳພຸສາ ມິດສາເທບອັບປະສອນ ຜູ້ມີວັນນະໜ້າຕ້ອງການ
ປາຖະໜາເພື່ອຈະໃຫ້ອິສີສິງຄະດາບົດ ເປື້ອນປົນດ້ວຍກິເລດ
ເມື່ອກ່າວແນວນີ້ແລ້ວກໍຫຼີກໄປ

[໑໐໖] ກໍອະລຳພຸສາເທບອັບປະສອນນັ້ນໄດ້ລົງສູ່ປ່າທີ່ອິສີສິງຄະດາບົດຮັກສາ
ເຊິ່ງເດຍລະດາດດ້ວຍເຄືອຕຳນິນສຸກມີປະມານເຄິ່ງໂຍດໂດຍຮອບນັ້ນ

[໑໐໗] ນາງເຂົ້າໄປຫາອິສີສິງຄະດາບົດຜູ້ກຳລັງປັດໂຮງໄຟແຕ່ເຊົ້າມືດ
ກ່ອນເວລາອາຫານເຊົ້າ ໃກ້ເວລາອາທິດອຸໄທ

(ລຳດັບນັ້ນ ດາບົດຖາມນາງວ່າ)

[໑໐໘] ທ່ານເປັນຜູ້ໃດນໍ?
ຮັດສະໝີຊ່າງງາມຜ່ອງໃສດັ່ງສາຍຟ້າ ປຽບດັ່ງດາວປະກາຍພຶກ
ປະດັບກຳໄລມືອັນວິຈິດ ສວມໃສ່ຕຸ້ມຫູແກ້ວມະນີ

[໑໐໙] ມີປະກາຍດັ່ງແສງອາທິດ ຮ່າງກາຍມີກິ່ນຫອມດ້ວຍຈັນເຫຼືອງ
ລຳຂາກົມກຽ້ງສວຍງາມ ມີສະເໜ່ຫຼາຍ
ກຳລັງຂຶ້ນສາວໄວລຸ້ນ ໜ້າຊື່ນຊົມຄົບຫາຫຼາຍ

[໑໑໐] ຕີນທັງ ໔ ຂອງທ່ານອ່ອນລະມຸນ ສະອາດມົດຈົດ ບໍ່ແຫວ່ງເວົ້າ
ຕັ້ງລົງຮາບສະເໝີດ້ວຍດີ ທຸກຢ່າງກ້າວຂອງທ່ານໜ້າຮັກແພງ
ດຶງໃຈອາດຕະມາໃຫ້ວາບຫວາມ

[໑໑໑] ອັນໜຶ່ງ ລຳຂາຂອງທ່ານເປັນປ້ອງ ໆ ເໝືອນກັບງວງຊ້າງ
ສະໂພກຂອງທ່ານກົ່ງງເກົາກົມກົ່ງງຜຶ່ງຜາຍສວຍງາມ
ເໝືອນແຜ່ນແປ້ນສະກາ

[໑໑໒] ນາພີຂອງທ່ານຕັ້ງຢູ່ຮຽບຮ້ອຍດີເໝືອນຝັກດອກອຸບົນ
ຜາກົດເຫັນໄດ້ແຕ່ໄກເໝືອນເກສອນດອກອັນຊັບຊ້ອນ

[໑໑໓] ຖັນເກີດທີ່ເອິກທັງຄູ່ຫາຂວັ້ນບໍ່ໄດ້
ເຕ່ງເຕົ້າສວຍງາມຊົງກະສຽນຮົດໄວ້
ບໍ່ຢ່ອນຍານ ສະເໝີເໝືອນກັບໝາກນ້ຳເຕົ້າເຄິ່ງໜ່ວຍ

[໑໑໔] ລຳຄໍຂອງທ່ານຍາວຄືດັ່ງລຳຄໍນາງເນື້ອຊາຍ
ເປ່ງປັ່ງດັ່ງພື້ນແຜ່ນຄຳ
ຮີມປາກນາງງາມເປ່ງປັ່ງດັ່ງລີ້ນຫົວໃຈຫ້ອງທີ ໔

[໑໑໕] ແຂ້ວຂອງທ່ານທັງຂ້າງເທິງຂ້າງລຸ່ມ
ຂັດສີໄດ້ຢ່າງເລີດດ້ວຍໄມ້ຊຳຮະແຂ້ວ
ເກີດຂຶ້ນ ໔ ເວລາ ເປັນແຂ້ວທີ່ປາສະຈາກໂທດ ເບິ່ງສວຍງາມ

[໑໑໖] ດວງເນດທັງ ໔ ຂອງທ່ານດຳສະນິດ
ຕາມຂອບດວງຕາເປັນສີແດງ ເປ່ງປັ່ງດັ່ງເມັດໝາກກ່ຳ
ທັງຍາວທັງກວ້າງ ເບິ່ງສວຍງາມ

[໑໑໗] ເສັ້ນຜົມທີ່ງອກຂຶ້ນເທິງຫົວຂອງທ່ານບໍ່ຍາວເກີນໄປ
ກົ່ງງເກົາດີ ຕົກແຕ່ງດ້ວຍຫວີຄຳ
ມີກິ່ນຫອມເໝືອນກິ່ນຈັນ

[໑໑໘] ຊາວນາຊາວໄຮ່ ຄົນລ້ຽງງົວ ພໍ່ຄ້າມີຄວາມສຳເລັດ
ແລະລືສີຜູ້ມີຄວາມສັງລວມ ພ່ຳເພັງຕະບະ
ມີຄວາມບາກບັ່ນ ມີປະມານເທົ່າໃດ

[໑໗໙] ຊົນມີປະມານທໍ່ນັ້ນໃນປະຖະພີມົນທົນນີ້
ແມ່ນຄົນໜຶ່ງທີ່ສະເໝີເໝືອນທ່ານ ອາດຕະມາຍັງບໍ່ເຫັນ
ທ່ານເປັນໃຜ ເປັນລູກຂອງຜູ້ໃດ ອາດຕະມາຈະຮູ້ຈັກທ່ານໄດ້ແນວໃດ

(ນາງອະລຳພຸສາເທບກັນຍາຮູ້ວ່າອິສີສິງຄະດາບົດນັ້ນຫຼົງໃຫຼແລ້ວ ຈຶ່ງກ່າວວ່າ)

[໑໘໐] ທ່ານກັດສະປະຜູ້ຈະເລີນ ເມື່ອຈິດຂອງທ່ານເປັນໄປແນວນີ້ແລ້ວ
ກໍບໍ່ແມ່ນການທີ່ຈະເປັນບັນຫາ ມາເທີ້ນ ສະຫາຍ
ເຮົາທັງ ໒ ຈັກອະພິຣົມກັນໃນອາສົມຂອງເຮົາ
ມາເທີ້ນ ຂ້ານ້ອຍຈັກບຳເລີທ່ານ
ຂໍທ່ານເປັນຜູ້ສະຫຼາດໃນຄວາມຍິນດີໃນປັນຈະກາມະຄຸນເທີ້ນ

(ພຣະສາດສະດາເມື່ອຈະຊົງປະກາດຄວາມຂໍ້ນັ້ນຈຶ່ງຕັດວ່າ)

[໑໘໑] ອະລຳພຸສາ ນິດສາເທບອັບປະສອນ ຜູ້ມີວັນນະໜ້າຕ້ອງການ
ປາຖະໜາເພື່ອຈະໃຫ້ອິສີສິງຄະດາບົດ ບຳເລີປະປົນດ້ວຍກິເລດ
ເມື່ອກ່າວແນວນີ້ແລ້ວກໍຫຼີກໄປ

[໑໘໒] ກໍດາບົດນັ້ນຕັດຄວາມເສື່ອຍຊາເສຍແລ້ວ ຟ້າວອອກໄປໂດຍໄວ
ເຂົ້າໄປປະຊິດຕົວນາງ ລູບຄຳເສັ້ນຜົມເທິງຫົວ

[໑໘໓] ເທບອັບປະສອນກັນລະຍານີຜູ້ມີຄວາມສວຍສົດງົດງາມ
ຫັນກັບມາສວມກອດດາບົດນັ້ນ
ນາງມີຄວາມຍິນດີທີ່ເຮັດໃຫ້ດາບົດເຄື່ອນຈາກພົມມະຈັນໄດ້
ຕາມທີ່ທ້າວສັກກະປາຖະໜາ

[໑໘໔] ນາງໄດ້ມີໃຈຮຳຮຶກເຖິງພຣະອິນເຊິ່ງປະທັບຢູ່ໃນນັນທະວັນ
ທ້າວມັກຄະວານເທບກຸນຊອນຊົງຮູ້ຄວາມດຳຣິຂອງນາງແລ້ວ

[໑໘໕] ຊົງສົ່ງບັນລັງ ພ້ອມທັງເຄື່ອງບໍລິວານ
ພ້ອມທັງທັບຊວງ ໕໐ ອັນ
ແລະເຄື່ອງປູລາດ ໑,໐໐໐ ຜືນ ໄປໂດຍໄວທັນທີ

[໑໘໖] ແມ່ໂສມງາມໂອບອຸ້ມດາບົດນັ້ນໄວ້ແນບເອິກ
ກົກກອດຢູ່ຕະຫຼອດ ໓ ປີບົນບັນລັງນັ້ນ

ຜ່ານໄປເປັນເໝືອນພຽງບຶດດຽວທໍ່ນັ້ນ

[໑໔໗] ໂດຍລ່ວງໄປ ໓ ປີ ດາບົດພານຈຶ່ງສ່າງເມົາ ຮູ້ສຶກຕົວ
ໄດ້ເຫັນຕົ້ນໄມ້ຂຽວຊະອຸ່ມຂຶ້ນຢູ່ໂດຍຮອບເຮືອນໄຟ

[໑໔໘] ປ່າໄມ້ຜັດໃບໃໝ່ ອອກດອກບານສະພັ່ງ
ກຶກກ້ອງໄປດ້ວຍຝູງນົກກາເວົາ ເມື່ອທ່ານຫຼຽວແນມເບິ່ງໂດຍຮອບ
ກໍຫຼັ່ງນ້ຳຕາຮ້ອງໄຫ້ລຳພັນວ່າ

[໑໔໙] ເຮົາບໍ່ໄດ້ບູຊາໄຟ ບໍ່ໄດ້ສາທະຍາຍມົນ
ອັນໃດບັນດານການບູຊາໄຟໃຫ້ເສື່ອມສິ້ນໄປ
ໃຜນໍປະເລົ້າປະໂລມບຳເລີຈິດຂອງເຮົາໃຫ້ຄາຍຄວາມພຽນ

[໑໕໐] ເມື່ອເຮົາຢູ່ປ່າ ຜູ້ໃດນໍມາຍຶດເອົາຊານ
ທີ່ເກີດມີພ້ອມກັບເດດຂອງເຮົາໄປ
ປຽບດັ່ງຍຶດເອົານາວາທີ່ເຕັມປ່ຽມດ້ວຍຣັດຕະນະ
ນານາຊະນິດໃນທ້ອງທະເລຫຼວງ

(ນາງອະລຳພຸສາເທບກັນຍາໄດ້ຟັງດັ່ງນັ້ນ ຈຶ່ງຜາກົດກາຍຢືນຢູ່ກ່າວວ່າ)

[໑໕໑] ຂ້ານ້ອຍຖືກທ້າວເທວະຣາດຊົງໃຊ້ມາເພື່ອບຳເລີທ່ານ
ໄດ້ໃຊ້ຈິດຂ້າຈິດທ່ານ ຍ້ອນຄວາມຜະໝາດ ທ່ານຈຶ່ງບໍ່ຮູ້ສຶກຕົວ

(ອິສິສິງຄະດາບົດໄດ້ຟັງນາງອະລຳພຸສາເທບກັນຍາແລ້ວ ຣະນຶກເຖິງໂອວາດທີ່ບິດາໃຫ້ໄວ້ຄ່ຳຄວນຢູ່ໄດ້ກ່າວວ່າ)

[໑໕໒] ຈິງແທ້ແລ້ວ ພໍ່ກັດສະປະພ່ຳສອນຄຳເວົ້າເຫຼົ່ານີ້ກັບເຮົາວ່າ
ມານົບ ຍິງປຽບໄດ້ກັບດອກນາຣີຜົນ
ເຈົ້າຈົ່ງຮູ້ຈັກຍິງເຫຼົ່ານັ້ນ

[໑໕໓] ພໍ່ກັດສະປະເບິ່ງຄືຈະເອື້ອອີດູເຮົາ
ຈຶ່ງພ່ຳສອນເຮົາແນວນີ້ວ່າ ມານົບ ເຈົ້າຈົ່ງຮູ້ຈັກຍິງຜູ້ມີຝີຢູ່ເອິກ
ເຈົ້າຈົ່ງຮູ້ຈັກຍິງເຫຼົ່ານັ້ນ

[໑໕໔] ເຮົາບໍ່ໄດ້ເຮັດຕາມຄຳສອນຂອງບິດາຜູ້ຈະເລີນນັ້ນ
ວັນນີ້ເຮົານັ້ນຈຶ່ງຊົບເຊົາຢູ່ແຕ່ຜູ້ດຽວໃນປ່າທີ່ຫາມະນຸດບໍ່ໄດ້

[໑໓໕] ໜ້າຕິຽນແທ້ນໍ ຊີວິດຂອງເຮົາ
ເຮົາຈັກເຮັດຢ່າງທີ່ເຮົາເຄີຍເປັນເຊັ່ນນັ້ນ
ຫຼືບໍ່ດັ່ງນັ້ນເຮົາກໍຈັກຕາຍສາ

(ພຣະສາດສະດາຕັດວ່າ)

[໑໓໖] ອະລໍາພຸສາເທບກັນຍາ ເມື່ອຮູ້ເດດ ຄວາມພຽນ
ແລະປັນຍາຂອງດາບົດນັ້ນ ດໍາຣົງໝັ້ນຄົງແລ້ວ
ຈຶ່ງຈັບຕີນທັງສອງຂອງດາບົດທູນໄວ້ທີ່ຫົວ
ລະລ່ໍາລະລັກກ່າວກັບອິສີສິງຄະດາບົດວ່າ

[໑໓໗] ຢ່າໂກດຂ້ານ້ອຍເລີຍ ທ່ານມະຫາວີຣະ
ຢ່າໂກດຂ້ານ້ອຍເລີຍ ທ່ານມະຫາລືສີ
ຂ້ານ້ອຍພ່ໍາເພັງປະໂຫຍດອັນໃຫຍ່ຫຼວງເພື່ອເທບຊັ້ນໄຕຣທົດຜູ້ມີຍົດ
ເພາະເທບບຸຣີທັງໝົດຖືກພຣະຜູ້ເປັນເຈົ້າເຮັດໃຫ້ຫວັ່ນໄຫວໃນເວລານັ້ນ

(ອິສີສິງຄະດາບົດກ່າວຄາຖາວ່າ)

[໑໓໘] ແມ່ນາງຜູ້ຈະເລີນ ຂໍຫວຍເທບຊັ້ນດາວວະດຶງ
ທ້າວວາສະວະແຫ່ງເທບຊັ້ນໄຕຣທົດ ແລະທ່ານຈົ່ງເປັນສຸກ ໆ ເທີ້ນ
ເຊີນທ່ານໄປຕາມສະບາຍເທີ້ນ ແມ່ເທບກັນຍາ

(ພຣະສາດສະດາຕັດວ່າ)

[໑໓໙] ອະລໍາພຸສາເທບກັນຍາ ເມື່ອຈັບຕີນທັງ ໔ ຂອງດາບົດແລ້ວ
ຈຶ່ງປະຄອງອັນຊະລີ ກະທໍາປະທັກຂິນດາບົດນັ້ນ
ແລ້ວໄດ້ຫຼີກໄປຈາກບ່ອນນັ້ນ

[໑໔໐] ນາງເທບກັນຍາຂຶ້ນສູ່ບັນລັງຄໍາ
ພ້ອມທັງເຄື່ອງບໍລິວານ ພ້ອມທັງທັບຊວງ
ແລະເຄື່ອງປູລາດ ໑,໐໐໐ ຜືນ ອັນເປັນຂອງນາງນັ້ນເອງ
ໄດ້ກັບໄປໃນສໍານັກເທບທັງຫຼາຍ

[໑໔໑] ທ້າວສັກກະຈອມເທບຊົງມີປີຕິແລະໂສມະນັດ ຍິນດີຫະໄທ
ໄດ້ພຣະຣາດຊະທານພອນກັບນາງເທບກັນຍານັ້ນເຊິ່ງກໍາລັງມາ
ພໍປານກັບປະທີບອັນຮຸ່ງເຮື່ອງ ດັ່ງສາຍຟ້າແມບ

(ນາງອະລຳພຸສາຂາບທູນວ່າ)

[໑໘໘] ຂ້າແດ່ທ້າວສັກກະຜູ້ເປັນໃຫຍ່ແຫ່ງພູດທັງປວງ
ຫາກພຣະອົງຊົງປະທານພອນແກ່ຂ້ານ້ອຍແລ້ວ
ຂໍຂ້ານ້ອຍຢ່າຕ້ອງໄປປະເລົ້າປະໂລມລືສີອີກເລີຍ
ຂ້າແດ່ທ້າວສັກກະ ຂ້ານ້ອຍຂໍພອນຂໍ້ນີ້ ດັ່ງນີ້ແລ

**ອະລຳພຸສາຊາດົກທີ ໑ ຈົບ**

# ໘. ສັງຂະປາລະຊາດົກ (໕໘໔)
## ວ່າດ້ວຍສັງຂະປາລະນາຄະຣາດ

(ພຣະເຈົ້າເມືອງພາຣານະສີຕັດວ່າ)

[໑໘໑] ທ່ານມີລັກສະນະຄ້າຍພຣະອະຣິຍະ ມີດວງຕາແຈ່ມໃສ
ເຫັນຈະເປັນຄົນບວດອອກຈາກສະກຸນ
ເຫດໃດນໍທ່ານຜູ້ມີປັນຍາຈຶ່ງສະລະຊັບແລະໂພຄະ
ອອກຈາກເຮືອນບວດສານໍ

(ອາລາຣະດາບົດຂາບທູນວ່າ)

[໑໘໔] ຂໍຖວາຍພຣະພອນມະຫາບໍພິດຜູ້ເປັນເທບແຫ່ງນໍຣະຊົນ
ອາດຕະມາໄດ້ເຫັນວິມານຂອງພະຍາສັງຂະປາລະນາຄະຣາດ
ຜູ້ມີອານຸພາບຫຼາຍດ້ວຍຕົນເອງ
ເມື່ອເຫັນແລ້ວ ຈຶ່ງໄດ້ບວດ
ເພາະເຊື່ອວິບາກອັນຍິ່ງໃຫຍ່ແຫ່ງບຸນທັງຫຼາຍ

(ພຣະຣາຊາຕັດວ່າ)

[໑໘໕] ບັນພະຊິດທັງຫຼາຍຍ່ອມບໍ່ກ່າວຄຳຕົວະ
ຍ້ອນຄວາມຮັກ ຍ້ອນຄວາມຊັງ ຍ້ອນຄວາມຢ້ານ
ພຣະຜູ້ເປັນເຈົ້າ ຂ້ານ້ອຍຖາມແລ້ວ
ຂໍພຣະຜູ້ເປັນເຈົ້າໂຜດບອກເນື້ອຄວາມນັ້ນແກ່ຂ້ານ້ອຍເທີ້ນ
ຍ້ອນໄດ້ຟັງ ຄວາມເຫຼື້ອມໃສຈັກເກີດຂຶ້ນແກ່ຂ້ານ້ອຍແດ່

(ອາລາຣະດາບົດຂາບທູນວ່າ)

[໑໔໖] ຂໍຖວາຍພຣະພອນມະຫາບໍພິດຜູ້ເປັນໃຫຍ່ແຫ່ງແຄວ້ນ
ອາດຕະມາເມື່ອເດີນທາງໄປຄ້າຂາຍໄດ້ເຫັນພວກບຸດຂອງນາຍພານ
ພາກັນຫາມພະຍານາກຕົວມີຮ່າງກາຍອ້ວນພີໃຫຍ່ຮ່າເຣີງຍ່າງໄປໃນຫົນທາງ

[໑໔໗] ຂໍຖວາຍພຣະພອນພຣະອົງຜູ້ຈອມຊົນ ອາດຕະມານັ້ນ
ໄດ້ມາພົບກັບເຂົາເຫຼົ່ານັ້ນ ກໍເກີດຢ້ານຈົນຂົນພອງສະຍອງເກົ້າ
ຈຶ່ງໄດ້ຖາມຂຶ້ນວ່າ ບຸດນາຍພານທັງຫຼາຍ ພວກທ່ານຈະນຳນາກນີ້
ເຊິ່ງມີຮ່າງກາຍເປັນຕາຢ້ານຕົວນີ້ແລ້ວຈະເອົາໄປເຮັດຫຍັງນໍ?

(ພວກເຂົາຕອບວ່າ)

[໑໔໘] ວິເທຫະບຸດ ພວກເຮົາຈະນຳນາກຕົວນີ້ໄປເພື່ອບໍຣິໂພກ
ນາກຕົວນີ້ມີຮ່າງກາຍອ້ວນພີໃຫຍ່ຕຸ້ຍ ຊີ້ນຂອງມັນມີຫຼາຍ
ອ່ອນນຸ້ມ ແລະມີຣົດຊາດແຊບ ທ່ານບໍ່ເຄີຍກິນຊີ້ນມັນບໍ?

[໑໔໙] ພວກເຮົາຈາກບ່ອນນີ້ໄປເຖິງທີ່ຢູ່ຂອງຕົນແລ້ວ
ຈະເອົາມີດປາດກິນຊີ້ນກັນໃຫ້ສຳຣານ
ຍ້ອນວ່າພວກເຮົາເປັນສັດຕູຂອງນາກທັງຫຼາຍ

(ອາດຕະມາຈຶ່ງເວົ້າວ່າ)

[໑໕໐] ຖ້າພວກທ່ານຈະນຳນາກ
ເຊິ່ງມີຮ່າງກາຍອ້ວນພີໃຫຍ່ຕຸ້ຍຕົວນີ້ໄປເພື່ອຈະບໍຣິໂພກແລ້ວ
ຂ້າພະເຈົ້າຈະໃຫ້ງົວຜູ້ເຊິ່ງມີກຳລັງແຂງແຮງແກ່ພວກທ່ານ ໑໖ ຕົວ
ຂໍພວກທ່ານຈົ່ງປ່ອຍນາກຕົວນີ້ຈາກເຄື່ອງພັນທະນາການເທີ້ນ

(ພວກເຂົາຕອບວ່າ)

[໑໕໑] ຄວາມຈິງນາກນີ້ເປັນອາຫານທີ່ໜ້າພໍໃຈຂອງພວກເຮົາແລ້ວ
ແລະພວກເຮົາກໍເຄີຍກິນນາກມາຫຼາຍ
ແຕ່ພວກເຮົາຈະເຮັດຕາມຄຳຂອງທ່ານນາຍອາລາຣະວິເທຫະບຸດ
ແລະຂໍທ່ານຈົ່ງເປັນມິດຂອງພວກເຮົາ

[໑໕໒] ບຸດນາຍພານເຫຼົ່ານັ້ນຈຶ່ງແກ້ນາຄະຣາດຕົວນັ້ນ

ອອກຈາກເຄື່ອງພັນທະນາການເຊິ່ງສອດເຂົ້າທາງດັ່ງຮ້ອຍໄວ້ໃນບ້ວງ
ນາຄະຣາດຕົວນັ້ນພົ້ນຈາກເຄື່ອງຜູກແລ້ວ
ບິດໜີ່ງຈີ່ງອວ່າຍໜ້າໄປສູ່ທິດປາຈີນຫຼີກໜີໄປ

[໑໕໓] ເມື່ອອວ່າຍໜ້າສູ່ທິດປາຈີນໄປໄດ້ບໍ່ດົນໄດ້ຫຼຽວຫົນກັບມາ
ແນມເບິ່ງອາດຕະມາດ້ວຍດວງຕາທັງ ໔ ທີ່ນອງໄປດ້ວຍນ້ຳຕາ
ໃນເວລານັ້ນ ອາດຕະມາໄດ້ປະຄອງອັນຊະລີທັງ ໑໐ ນີ້ວ
ຍ່າງຕາມໄປຂ້າງຫຼັງ ກ່າວເຕືອນວ່າ

[໑໕໔] ທ່ານຈົ່ງຮີບຟ້າວໄປໂດຍໄວເທີ້ນ ຂໍສັດຕູຢ່າຈັບທ່ານໄດ້ອີກເລີຍ
ຍ້ອນການສະມາຄົມກັບພວກພານອີກເປັນທຸກ
ທ່ານຈົ່ງໄປສູ່ສະຖານທີ່ທີ່ພວກບຸດນາຍພານບໍ່ເຫັນເທີ້ນ

[໑໕໕] ນາຄະຣາດນັ້ນໄດ້ໄປສູ່ຫ້ວງນ້ຳໃສ ສີຂຽວຄາມໂອພາດ
ມີທ່າອັນງົດງາມ ໜ້າອອນຊອນໃຈ
ປົກຄຸມໄປດ້ວຍໝູ່ຕົ້ນຫວ້າແລະຕົ້ນອະໂສກ
ເປັນຜູ້ປອດໄພ ເບີກບານໃຈ ໄດ້ເຂົ້າໄປສູ່ນາຄະໂລກ

[໑໕໖] ມະຫາບໍພິດຜູ້ຈອມຊິນ ນາຄະຣາດນັ້ນ
ເມື່ອເຂົ້າໄປສູ່ນາຄະໂລກນັ້ນໄດ້ບໍ່ດົນ
ໄດ້ມາຜາກົດແກ່ອາດຕະມາພ້ອມດ້ວຍບໍລິວານເປັນທິບ
ບຳຣຸງອາດຕະມາເໝືອນບຸດບຳຣຸງບິດາ
ກ່າວຄຳເວົ້າອັນຈັບໃຈສະບາຍຫູວ່າ

(ພະຍານາກສັງຂະປາລະກ່າວວ່າ)

[໑໕໗] ທ່ານອາລາຣະ ທ່ານເປັນມານດາບິດາຂອງຂ້າພະເຈົ້າ
ເປັນດັ່ງດວງໃຈ ເປັນຜູ້ໃຫ້ຊີວິດ ເປັນສະຫາຍ
ຂ້າພະເຈົ້າຈື່ງໄດ້ອິດທິລິດຂອງຕົນຄືນມາ
ຂໍເຊີນທ່ານໄປຢ້ຽມບ່ອນຢູ່ຂອງຂ້າພະເຈົ້າ
ເຊິ່ງມີອາຫານພຽງພໍ ມີເຂົ້າແລະນ້ຳຈຳນວນຫຼາຍ
ດັ່ງຂຸນເຂົາສິເນຣຸໂລກຂອງທ້າວວາສະວະ

(ພະຍານາກສັງຂະປາລະກ່າວວ່າ)

[໑໕໗] ນາຄະໂລກນັ້ນປະກອບໄປດ້ວຍພູມີພາກອັນງົດງາມ
ພື້ນດິນທີ່ບໍ່ມີກ້ອນຫີນນ້ອຍໆ ອ່ອນນຸ້ມແລະງົດງາມ
ມີຫຍ້າເຕ້ຍ ໆ ປາດສະຈາກຝຸ່ນລະອອງໜ້າອອນຊອນ
ເປັນສະຖານທີ່ຣະງັບຄວາມເສົ້າໂສກຂອງຜູ້ທີ່ເຂົ້າໄປ

[໑໕໙] ມີສະໂບກຂະຣະນີທີ່ບໍ່ອາກູນ ສີຂຽວຄາມຍ້ອນແກ້ວໄພທູນ
ມີສວນໝາກມ່ວງທີ່ໜ້າຣື່ນຣົມຍິ່ງທັງ ໔ ທິດ
ຕິດໜ່ວຍຢູ່ເປັນນິດຕະຫຼອດລະດູການ ມີທັງໜ່ວຍສຸກ
ໜ່ວຍຫ່າມ ແລະໜ່ວຍອ່ອນ

(ອາລາຣະດາບົດຂາບທູນວ່າ)

[໑໖໐] ຂໍຖວາຍພຣະພອນ ນິນເທບມະຫາບໍພິດໃນທ່າມກາງ
ສວນໝາກມ່ວງທັງ ໔ ທິດ ມີນິເວດເຫຼື້ອມປະພັດສອນສ້າງດ້ວຍຄຳ
ບານປະຕູສຳເລັດດ້ວຍເງິນ ຮຸ່ງເຮືອງໂອລານປານສາຍຟ້າໃນອາກາດ

[໑໖໑] ໃນນິເວດນັ້ນ ມີເຮືອນຍອດແລະຫ້ອງໃຫຍ່
ສ້າງດ້ວຍແກ້ວມະນີແລະຄຳ ວິຈິດດ້ວຍສິລະປະອະເນກປະການ
ເຊິ່ງເນຣະມິດໄວ້ດີແລ້ວຕິດຕໍ່ກັນ ເຕັມໄປດ້ວຍນາງນາກກັນຍາທັງຫຼາຍ
ຜູ້ປະດັບຕົບແຕ່ງຮ່າງກາຍລ້ວນສວມໃສ່ສາຍສ້ອຍຄຳ

[໑໖໒] ສັງຂະປາລະນາຄະຣາດຜູ້ມີພິວພັນບໍ່ຊາມນັ້ນ ຟ້າວຂຶ້ນສູ່ຜາສາດ
ເຊິ່ງມີອານຸພາບນັບບໍ່ໄດ້ ມີເສົາ ໑,໐໐໐ ຕົ້ນ
ອັນເປັນສະຖານທີ່ຢູ່ຂອງພັນລະຍາຜູ້ເປັນມະເຫສີຂອງເຂົາ

[໑໖໓] ແລະນາຣີນາງໜຶ່ງບໍ່ຕ້ອງເຕືອນ
ຟ້າວນຳອາສະນະອັນສຳເລັດດ້ວຍແກ້ວໄພທູນ ມີຄ່າຫຼາຍງົດງາມ
ປະກອບດ້ວຍແກ້ວມະນີຊັ້ນດີມີຣາຄາມາປູລາດ

[໑໖໔] ລຳດັບນັ້ນ ນາຄະຣາດຈູງມືອາດຕະມາໃຫ້ນັ່ງ
ໃນອາສະນະອັນເປັນປະທານໂດຍກ່າວວ່າ
ນີ້ອາສະນະ ທ່ານຜູ້ຈະເລີນໂຜດນັ່ງເທິງອາສະນະນີ້ເທີ້ນ
ຍ້ອນບັນດາທ່ານຜູ້ເປັນທີ່ເຄົາລົບທັງຫຼາຍຂອງຂ້າພະເຈົ້າ
ທ່ານຜູ້ຈະເລີນກໍເປັນຄົນໜຶ່ງ

[໑໖໕] ຂໍຖວາຍພຣະພອນ ພຣະອົງຜ຺ູ້ຈອມຊົນ
ແລະນາຣີອີກນາງໜຶ່ງຟ້າວນຳນ້ຳເຂົ້າມາລ້າງຕີນອາດຕະມາ
ເໝືອນພັນລະຍາລ້າງຕີນພັດສະດາສາມີສຸດທີ່ຮັກ

[໑໖໖] ແລະນາຣີອື່ນອີກນາງໜຶ່ງຟ້າວປະຄອງຖາດຄຳ
ນ້ອມນຳພັດຕາຫານທີ່ໜ້າພໍໃຈ ມີແກງຫຼາຍຊະນິດ
ມີກັບຫຼາຍຢ່າງເຂົ້າມາ

[໑໖໗] ພາຣະຕະມະຫາບໍພິດພຣະອົງ ນາຣີເຫຼົ່ານັ້ນຮູ້ໃຈພັດສະດາ
ບຳເລີອາດຕະມາຜູ້ບໍຣິໂພກສຳເລັດແລ້ວດ້ວຍດົນຕີທັງຫຼາຍ
ຍິ່ງໄປກວ່ານັ້ນ ນາຄະຣາດເຂົ້າໄປຫາອາດຕະມາ
ພ້ອມດ້ວຍກາມມະຄຸນອັນເປັນທິບ
ອັນໂອລານບໍ່ແມ່ນໜ້ອຍ ກ່າວວ່າ

[໑໖໘] ທ່ານອາລາຣະ ພັນລະຍາຂອງຂ້າພະເຈົ້າທັງ ໓໐໐ ນາງເຫຼົ່ານີ້
ລ້ວນແອວບາງຮ່າງນ້ອຍ ມີຜິວພັນດັ່ງກີບປະທຸມ
ທ່ານອາລາຣະ ນາງເຫຼົ່ານີ້ເພິ່ງບຳເລີກາມແກ່ທ່ານ
ຂໍທ່ານໂຜດໃຫ້ນາງເຫຼົ່ານັ້ນບຳເລີທ່ານເທີ້ນ

(ອາລາຣະດາບົດຂາບທູນຕໍ່ໄປວ່າ)

[໑໖໙] ອາດຕະມາໄດ້ສະເຫວີຍກາມຣົດອັນເປັນທິບຢູ່ ໑ ປີ
ເວລານັ້ນ ຈຶ່ງໄດ້ຖາມຍິ່ງຂຶ້ນໄປວ່າ ນາກສົມບັດນີ້
ທ່ານໄດ້ເພາະເຮັດກຳອັນໃດ ໄດ້ແນວໃດ
ເຫດໃດທ່ານຈຶ່ງໄດ້ຄອບຄອງວິມານອັນປະເສີດ

[໑໗໐] ທ່ານໄດ້ໂດຍບໍ່ມີເຫດ ຫຼືເກີດຍ້ອນໃຜນ້ອມມາເພື່ອທ່ານ
ທ່ານເຮັດເອງ ຫຼືເທວະດາທັງຫຼາຍໃຫ້
ຂ້າພະເຈົ້າຖາມເນື້ອຄວາມນັ້ນກັບທ່ານນາຄະຣາດ
ເຫດໃດທ່ານຈຶ່ງໄດ້ຄອບຄອງວິມານອັນປະເສີດ

(ພະຍານາກສັງຂະປາລະຕອບວ່າ)

[໑໗໑] ວິມານນີ້ຂ້າພະເຈົ້າໄດ້ມາໂດຍບໍ່ມີເຫດຫາບໍ່ໄດ້
ເກີດຍ້ອນໃຜນ້ອມມາເພື່ອຂ້າພະເຈົ້າກໍຫາບໍ່ໄດ້

ຂ້າພະເຈົ້າເຮັດເອງກໍຫາບໍ່ໄດ້
ແມ່ນເທວະດາທັງຫຼາຍກໍບໍ່ໄດ້ມອບໃຫ້
ແຕ່ຂ້າພະເຈົ້າໄດ້ຍ້ອນບຸນກຳເຊິ່ງບໍ່ແມ່ນບາບຂອງຕົນ

(ອາລາຣະດາບົດຖາມວ່າ)

[໑໗໔] ຂໍ້ວັດຂອງທ່ານເປັນແນວໃດ
ອັນໜຶ່ງ ພົມມະຈັນຂອງທ່ານເປັນແນວໃດ
ນີ້ເປັນຜົນແຫ່ງຂໍ້ວັດແລະພົມມະຈັນທີ່ທ່ານປະພຶດດີແລ້ວແນວໃດ
ນາຄະຣາດ ຂໍທ່ານໂຜດບອກເນື້ອຄວາມນັ້ນແກ່ຂ້າພະເຈົ້າເທີ້ນວ່າ
ທ່ານໄດ້ວິມານນີ້ແນວໃດນໍ

(ພະຍານາກສັງຂະປາລະຕອບວ່າ)

[໑໗໕] ຂ້າພະເຈົ້ານັ້ນໄດ້ເປັນພຣະຣາຊາ ຜູ້ເປັນໃຫຍ່ກວ່າຊົນຊາວມະຄົດ
ມີນາມວ່າ ທຸໂຍທະນະ ມີອານຸພາບຫຼາຍ
ໄດ້ເຫັນແຈ້ງວ່າ ຊີວິດມີພຽງເລັກໜ້ອຍ ບໍ່ທ່ຽງ
ມີຄວາມປັ່ນປ່ວນໄປເປັນທຳມະດາ

[໑໗໔] ຂ້າພະເຈົ້າມີຈິດເຫຼື້ອມໃສ ໄດ້ໃຫ້ເຂົ້າແລະນ້ຳ
ເປັນທານຢ່າງໄພບູນໂດຍເຄົາລົບ
ພຣະຣາດຊະວັງຂອງຂ້າພະເຈົ້າໃນເວລານັ້ນ ເປັນເໝືອນຄັງອາຫານ
ທັງສະມະນະແລະພາມຈຶ່ງອີ່ມໜຳສຳຣານ

[໑໗໕] ໃນພະຣາດຊະວັງນັ້ນ ຂ້າພະເຈົ້າໄດ້ໃຫ້ພວງດອກໄມ້
ຂອງຫອມ ເຄື່ອງລູບໄລ້ ປະທີບ ຍານພາຫະນະ
ບ່ອນພັກອາໄສ ຜ້ານຸ່ງ ຜ້າຫົ່ມ ບ່ອນນອນ
ເຂົ້າແລະນ້ຳເປັນທານໂດຍເຄົາລົບ
[໑໗໖] ນັ້ນເປັນພົດແລະນັ້ນເປັນພົມມະຈັນຂອງຂ້າພະເຈົ້າ
ນີ້ເປັນວິບາກແຫ່ງກຳນັ້ນທີ່ຂ້າພະເຈົ້າປະພຶດດີແລ້ວ
ຍ້ອນວິບາກແຫ່ງກຳນັ້ນນັ້ນ ຂ້າພະເຈົ້າຈຶ່ງໄດ້ວິມານນີ້
ເຊິ່ງມີອາຫານພຽງພໍ ມີເຂົ້າແລະນ້ຳຈຳນວນຫຼາຍ
ແລະສົມບູນດ້ວຍການຟ້ອນລຳຂັບຮ້ອງ
ແຕ່ວິມານນີ້ບໍ່ຈີຣັງຍັ່ງຍືນແລະບໍ່ທ່ຽງ

(ອາລາຣະດາບົດຖາມວ່າ)

[໑໗໗] ບຸດນາຍພານທັງຫຼາຍ ຜູ້ມີອານຸພາບໜ້ອຍ ບໍ່ມີເດດ
ຍ່ອມບຽດບຽນທ່ານຜູ້ມີອານຸພາບຫຼາຍ ມີເດດໄດ້
ຍ້ອນເຫດໃດ ທ່ານຜູ້ມີແຂ້ວເປັນອາວຸດ ຍ້ອນອາໄສເຫດອັນໃດ
ທ່ານຈຶ່ງໄດ້ຕົກຢູ່ໃນເງື້ອມມືຂອງບຸດນາຍພານໄດ້

[໑໗໘] ມະຫັນຕະໄພນໍາມາຮອດທ່ານແລ້ວບໍ?
ຫຼືວ່າພິດແລ່ນໄປບໍ່ເຖິງຮາກແຂ້ວຂອງທ່ານ
ທ່ານຜູ້ມີແຂ້ວເປັນອາວຸດ ຍ້ອນອາໄສເຫດອັນໃດຢູ່ບໍ?
ທ່ານຈຶ່ງເຖິງຄວາມທຸກໃນສໍານັກຂອງພວກບຸດນາຍພານ

(ພະຍານາກສັງຂະປາລະຕອບວ່າ)

[໑໗໙] ມະຫັນຕະໄພນໍາມາຮອດຂ້າພະເຈົ້າກໍຫາບໍ່ໄດ້
ພິດຂອງຂ້າພະເຈົ້າພວກບຸດນາຍພານເຫຼົ່ານັ້ນກໍບໍ່ອາດຈະທໍາລາຍໄດ້
ແຕ່ທໍາຂອງສັດຕະບຸຣຸດທັງຫຼາຍທີ່ທ່ານປະກາດໄວ້ດີແລ້ວ
ຍາກທີ່ຈະລ່ວງໄດ້ດັ່ງເຂດແດນແຫ່ງມະຫາສະມຸດ

[໑໘໐] ທ່ານອາລາຣະ ວັນ ໑໔ ຄ່ຳ ໑໕ ຄ່ຳ
ຂ້າພະເຈົ້າເຂົ້າຈໍາອຸໂປສົດຢູ່ເປັນນິດ ເວລານັ້ນ
ພວກບຸດນາຍພານ ໑໖ ຄົນຖືເຊືອກແລະບ້ວງອັນໝັ້ນຄົງມາ

[໑໘໑] ພວກພານຊ່ອຍກັນເຈາະດັງແລ້ວຮ້ອຍເຊືອກ
ແລ້ວຊ່ອຍກັນຫາມນໍາຂ້າພະເຈົ້າໄປ
ຂ້າພະເຈົ້າອົດກັ້ນຄວາມທຸກເຊັ່ນນັ້ນ ບໍ່ໄດ້ເຮັດໃຫ້ອຸໂປສົດກໍາເຣີບ

(ອາລາຣະດາບົດຖາມວ່າ)

[໑໘໔] ພວກບຸດນາຍພານໄດ້ເຫັນທ່ານ
ຜູ້ສົມບູນດ້ວຍພະລັງແລະຜິວພັນທີ່ຫົນທາງທີ່ຍ່າງໄດ້ຄົນດຽວ
ນາຄະຣາດ ກໍທ່ານເປັນຜູ້ຈະເລີນແລ້ວດ້ວຍສິຣິແລະປັນຍາ
ຍັງພ່ຳເພັງຕະບະຢູ່ເພື່ອປະໂຫຍດອັນໃດ

(ພະຍານາກສັງຂະປາລະຕອບວ່າ)

[໑໗໓] ທ່ານອາລາຣະ ຂ້າພະເຈົ້າພໍ່າເພັງຕະບະ
ຍ້ອນເຫດແຫ່ງບຸດ ຍ້ອນເຫດແຫ່ງຊັບສົມບັດ
ຫຼືແມ່ນຍ້ອນເຫດແຫ່ງອາຍຸກໍຫາບໍ່ໄດ້
ແຕ່ຍ້ອນຂ້າພະເຈົ້າປາຖະໜາກໍາເນີດແຫ່ງມະນຸດ
ຍ້ອນເຫດນັ້ນ ຈຶ່ງບາກບັ່ນພໍ່າເພັງຕະບະ

(ອາລາຣະດາບົດຖາມວ່າ)

[໑໗໔] ທ່ານມີໜ່ວຍຕາແດງ ມີຣັດສະໝີຮຸ່ງເຮືອງ ປະດັບຕົບແຕ່ງຮ່າງກາຍ
ຕັດຜົມແລະແຖໜວດຮຽບຮ້ອຍ
ລູບໄລ້ທາຜິວພັນດ້ວຍດີດ້ວຍຈັນແດງ
ສ່ອງສະຫວ່າງໄປທົ່ວທິດ ດັ່ງຣາຊາແຫ່ງຄົນທັນ

[໑໗໕] ທ່ານເປັນຜູ້ບັນລຸເທວະລິດແລ້ວ ມີອານຸພາບຫຼາຍ
ພ້ຽບພ້ອມດ້ວຍກາມມະຄຸນທຸກຢ່າງ
ນາຄະຣາດ ຂ້າພະເຈົ້າຂໍຖາມເນື້ອຄວາມນີ້ກັບທ່ານວ່າ
ມະນຸດໂລກປະເສີດກວ່ານາຄະໂລກນີ້ ຍ້ອນເຫດໃດ

(ພະຍານາກສັງຂະປາລະຕອບວ່າ)

[໑໗໖] ທ່ານອາລາຣະ ນອກຈາກມະນຸດໂລກແລ້ວ
ຄວາມບໍລິສຸດຫຼືຄວາມສັງລວມບໍ່ມີ
ກໍຂ້າພະເຈົ້າໄດ້ກໍາເນີດມະນຸດແລ້ວ
ຈັກທໍາທີ່ສຸດແຫ່ງຊາດແລະມໍລະນະ

(ອາລາຣະດາບົດກ່າວວ່າ)

[໑໗໗] ເປັນເວລາໜຶ່ງປີ ເມື່ອຂ້າພະເຈົ້າຢູ່ໃນສໍານັກຂອງທ່ານ
ໄດ້ຮັບການບໍາຣຸງດ້ວຍເຂົ້າແລະນໍ້າ ທ່ານນາຄົນຜູ້ປະເສີດ
ຂ້າພະເຈົ້າຈາກມະນຸດໂລກມານານ ຈະຂໍລາທ່ານໄປແລ້ວ

(ພະຍານາກສັງຂະປາລະຖາມວ່າ)

[໑໗໘] ບຸດ ພັນລະຍາ ແລະຊົນທີ່ຂ້າພະເຈົ້າຊຸບລ້ຽງ
ເຊິ່ງຂ້າພະເຈົ້າພໍ່າສອນເປັນນິດວ່າ ເພິ່ງບໍາຣຸງທ່ານ

ບໍ່ມີໃຜຈັກຄົນສາບແຊ່ງທ່ານຢູ່ບໍ? ທ່ານອາລາຣະ
ກໍການໄດ້ພົບເຫັນທ່ານນັບວ່າເປັນທີ່ພໍໃຈຂອງຂ້າພະເຈົ້າ

(ອາລາຣະດາບົດຕອບວ່າ)

[໑໗໙] ບຸດສຸດທີ່ຮັກເພິ່ງໄດ້ຮັບການປະຕິບັດ
ຢູ່ໃນເຮືອນມານດາບິດາແມ່ນໂດຍປະການໃດ
ທ່ານກໍປະຕິບັດຂ້າພະເຈົ້າໃນບ່ອນນີ້ແລ ປະເສີດກວ່າແມ່ນໂດຍປະການນັ້ນ
ຍ້ອນຈິດຂອງທ່ານເຫຼື້ອມໃສໃນຂ້າພະເຈົ້າ ນາຄະຣາດ

(ພະຍານາກສັງຂະປາລະກ່າວວ່າ)

[໑໘໐] ແກ້ວມະນີສີແດງ ເຊິ່ງນໍາຊັບມາໃຫ້ໄດ້ຂອງຂ້າພະເຈົ້າມີຢູ່
ທ່ານຈົ່ງຖືເອົາແກ້ວມະນີອັນໂອລານໄປສູ່ບ່ອນຢູ່ຂອງຕົນ
ເມື່ອໄດ້ຊັບແລ້ວ ຈົ່ງເກັບແກ້ວມະນີນັ້ນໄວ້

(ອາລາຣະດາບົດກ່າວ ໘ ຄາຖາວ່າ)

[໑໘໑] ຂໍຖວາຍພຣະພອນມະຫາບໍພິດ ການທັງຫຼາຍແມ່ນເປັນຂອງມະນຸດ
ອາດຕະມາກໍໄດ້ເຫັນແລ້ວ ເປັນຂອງບໍ່ທ່ຽງ ມີຄວາມປັ່ນປ່ວນເປັນທໍາມະດາ
ຍ້ອນເຫັນໂທດໃນການມະຄຸນທັງຫຼາຍ ອາດຕະມາຈຶ່ງບວດດ້ວຍສັດທາ

[໑໘໘] ທັງຄົນໜຸ່ມທັງຄົນແກ່
ຍ່ອມມີກາຍແຕກທໍາລາຍໄປ ເໝືອນໝາກໄມ້ຫຼົ່ນຈາກຕົ້ນ
ມະຫາບໍພິດ ອາດຕະມາເຫັນຂໍ້ປະຕິບັດອັນບໍ່ຜິດແມ່ນນີ້ວ່າ
ຄວາມເປັນສະມະນະນັ້ນປະເສີດ ຈຶ່ງໄດ້ບວດ

(ພຣະຣາຊາຕັດວ່າ)

[໑໘໓] ຊົນເຫຼົ່າໃດມີປັນຍາ ເປັນພະຫູສູດ
ຄິດເຫດການໄດ້ເປັນຈໍານວນຫຼາຍ ຊົນເຫຼົ່ານັ້ນຄວນຄົບຫາໂດຍແທ້
ພຣະຜູ້ເປັນເຈົ້າອາລາຣະ ຂ້ານ້ອຍໄດ້ຟັງເລື້ອງຂອງນາຄະຣາດ
ແລະຂອງພຣະຜູ້ເປັນເຈົ້າແລ້ວ ຈັກທໍາບຸນໃຫ້ຫຼາຍ

(ອາລາຣະດາບົດກ່າວວ່າ)

[໑໙໔] ຊົນເຫຼົ່າໃດມີປັນຍາ ເປັນພະຫູສູດ
ຄິດເຫດການໄດ້ເປັນຈຳນວນຫຼາຍ ຊົນເຫຼົ່ານັ້ນຄວນຄົບຫາໂດຍແທ້
ຂໍເດຊະພຣະຣາຊາ ພຣະອົງຊົງສະດັບເລື້ອງນາຄະຣາດ
ແລະຂອງອາດຕະມາແລ້ວ
ຂໍຈົ່ງຊົງພ່ຳເພັງບຸນໃຫ້ຫຼາຍເທີ້ນ

**ສັງຂະປາລະຊາດົກທີ ໔ ຈົບ**

# ໕. ຈູລະສຸຕະໂສມະຊາດົກ (໕໒໕)
# ວ່າດ້ວຍເຫດທີ່ພຣະເຈົ້າຈູລະສຸຕະໂສມອອກບວດ

(ພຣະໂພທິສັດສຸຕະໂສມຕັດວ່າ)

[໑໙໕] ເຮົາຂໍປະກາດໃຫ້ຊາວນິຄົມ ມິດ ອຳມາດ
ແລະຂ້າຣາດຊະບໍຣິພານໄດ້ຮູ້
ບັດນີ້ ຜົມເທິ່ງຫົວຂອງເຮົາຫງອກແລ້ວ
ເຮົາຈຶ່ງພໍໃຈການບັນພະຊາ

(ອຳມາດຜູ້ອົງອາດແກ່ກ້າຄົນໜຶ່ງຂາບທູນວ່າ)

[໑໙໖] ເປັນຫຍັງນໍ ພຣະອົງຈຶ່ງຮັບສັ່ງຄວາມບໍ່ຈະເລີນແກ່ຂ້າພຣະອົງ
ຂໍເດຊະພຣະອົງຜູ້ສົມມຸດຕິເທບ
ພຣະອົງຊົງປັກພຣະແສງສອນປັກເອິກຂອງຂ້າພຣະອົງ
ພຣະອົງຊົງມີພຣະຊາຍາເຖິງ ៧໐໐ ນາງ
ພຣະຊາຍາເຫຼົ່ານັ້ນຂອງພຣະອົງຈັກເປັນແນວໃດນໍ?

(ພຣະໂພທິສັດຈູລະສຸຕະໂສມຕັດວ່າ)

[໑໙໗] ນາງທັງຫຼາຍເຫຼົ່ານັ້ນຈັກຜາກົດຕາມກຳຂອງຕົນເອງ
ພວກນາງຍັງສາວ ຈັກໄປເພິ່ງພາພຣະຣາຊາແມ່ນພຣະອົງອື່ນໄດ້
ສ່ວນເຮົາປາຖະໜາສະຫວັນ ຍ້ອນເຫດນັ້ນ ຈຶ່ງຈັກບັນພະຊາ

(ພຣະຣາດຊະຊົນນີຮີບສະເດັດມາໂດຍດ່ວນຕັດຖາມວ່າ)

[໑໙໘] ລູກສຸຕະໂສມ ການທີ່ແມ່ເປັນແມ່ຂອງເຈົ້າ

ນັບວ່າແມ່ໄດ້ເຈົ້າມາດ້ວຍຄວາມລຳບາກ
ເມື່ອແມ່ພ່ຳເພີ້ລຳພັນຢູ່
ຍ້ອນເຫດໃດ ເຈົ້າຈຶ່ງບໍ່ອາໄລຈະບວດສານໍ

[໑໙໙] ລູກສຸຕະໂສມ ການທີ່ແມ່ໃຫ້ເຈົ້າເກີດມາ
ນັບວ່າແມ່ໄດ້ເຈົ້າມາດ້ວຍຄວາມລຳບາກ
ເມື່ອແມ່ພ່ຳເພີ້ລຳພັນຢູ່
ຍ້ອນເຫດໃດ ເຈົ້າຈຶ່ງບໍ່ອາໄລຈະອອກບວດສານໍ

(ພຣະຊະນົກຊົງຮູ້ຂ່າວແລ້ວສະເດັດມາ ຕັດຖາມວ່າ)

[໘໐໐] ລູກສຸຕະໂສມທຳນັ້ນຊື່ອັນໃດ
ແລະອັນໃດຊື່ວ່າການບັນພະຊາ
ຍ້ອນເຫດໃດ ເຈົ້າເປັນບຸດຂອງເຮົາທັງ ໒ ຈຶ່ງບໍ່ມີຄວາມອາໄລ
ຈະລະຖິ້ມເຮົາທັງ ໒ ຜູ້ແກ່ເຖົ້າໄປບວດສານໍ

[໘໐໑] ແມ່ນລູກຊາຍລູກສາວຂອງລູກກໍມີຢູ່ຫຼາຍ
ຍັງນ້ອຍຢູ່ ຍັງບໍ່ເປັນໜຸ່ມເປັນສາວ
ແມ່ນເດັກເຫຼົ່ານັ້ນກໍກຳລັງເປັນຕາຮັກ
ເມື່ອບໍ່ເຫັນພໍ່ ເຫັນຈະເປັນທຸກໄປຕາມ ໆ ກັນ

(ພຣະໂພທິສັດຈູລະສຸຕະໂສມສະດັບພຣະດຳຣັດແລ້ວ ຂາບທູນວ່າ)

[໘໐໒] ການຢູ່ຮ່ວມກັນແມ່ນດົນແລ້ວພັດພາກຈາກກັນ
ຂອງຂ້ານ້ອຍກັບລູກທັງຫຼາຍເຫຼົ່ານັ້ນເຊິ່ງຍັງເດັກຢູ່
ຍັງບໍ່ເປັນໜຸ່ມເປັນສາວ ກຳລັງເປັນຕາຮັກແມ່ນທັງໝົດ
ແລະຈາກພຣະອົງທັງ ໒ ພຣະອົງເປັນຂອງແນ່ນອນ

(ພຣະຊາຍາທັງຫຼາຍຮູ້ຂ່າວແລ້ວຄ່ຳຄວນຢູ່ຂາບທູນວ່າ)

[໘໐໓] ຂໍເດຊະພຣະອົງຜູ້ສົມມຸດຕິເທບ
ພຣະອົງຊົງຕັດພຣະຫະໄທດີແລ້ວແມ່ນບໍ?
ຊົງໝົດຄວາມກະລຸນາໃນພວກຂ້ານ້ອຍແລ້ວຫຼືຍ້ອນເຫດໃດ
ພຣະອົງຈຶ່ງບໍ່ອາໄລພວກຂ້ານ້ອຍຜູ້ຄ່ຳຄວນຢູ່
ຈະສະເດັດອອກບວດສາແລ້ວນໍ

(ພຣະໂພທິສັດຈູລະສຸຕະໂສມສະດັບສຽງຄ່ຳຄວນຂອງພຣະຊາຍາເຫຼົ່ານັ້ນແລ້ວຕັດວ່າ)

[໔໐໔] ເຮົາຕັດໃຈໄດ້ແລ້ວກໍຫາບໍ່ໄດ້
ແລະເຮົາກໍຍັງມີຄວາມກະລຸນາໃນພວກທ່ານຢູ່
ແຕ່ວ່າເຮົາປາຖະໜາສະຫວັນ
ຍ້ອນເຫດນັ້ນ ຈຶ່ງຈັກບວດ

(ພຣະມະເຫສີຊົງຖືພາແກ່ໄດ້ຂາບທູນວ່າ)

[໔໐໕] ເຈົ້າອ້າຍສຸຕະໂສມ ການທີ່ຂ້ານ້ອຍເປັນມະເຫສີຂອງເຈົ້າອ້າຍ
ນັບວ່າຂ້ານ້ອຍໄດ້ເຈົ້າອ້າຍມາດ້ວຍຄວາມຍາກລຳບາກ
ຂໍເດຊະພຣະອົງຜູ້ສົມມຸດຕິເທບ ເມື່ອຂ້ານ້ອຍພ່ຳເພີ້ລຳພັນຢູ່
ຍ້ອນເຫດໃດ ເຈົ້າອ້າຍຈຶ່ງບໍ່ຊົງອາໄລ ຈະຊົງບວດສານໍ

[໔໐໖] ເຈົ້າອ້າຍສຸຕະໂສມ ການທີ່ຂ້ານ້ອຍເປັນມະເຫສີຂອງເຈົ້າອ້າຍ
ນັບວ່າຂ້ານ້ອຍໄດ້ເຈົ້າອ້າຍມາດ້ວຍຄວາມຍາກລຳບາກ
ຂໍເດຊະພຣະອົງຜູ້ສົມມຸດຕິເທບ ຍ້ອນເຫດໃດ
ເຈົ້າອ້າຍຈຶ່ງບໍ່ຊົງອາໄລພຣະໂອຣົດທີ່ຢູ່ໃນທ້ອງຂອງຂ້ານ້ອຍ
ຈະຊົງອອກບວດສາແລ້ວນໍ

[໔໐໗] ທ້ອງຂອງຂ້ານ້ອຍແກ່ແລ້ວ
ຂໍພຣະອົງຖ້າຢູ່ຈົນກວ່າຂ້ານ້ອຍຈະໃຫ້ພຣະໂອຣົດເກີດ
ຂໍຂ້ານ້ອຍຢ່າໄດ້ເປັນໝ້າຍຢູ່ແຕ່ຜູ້ດຽວ
ໄດ້ປະສົບທຸກຍາກໃນພາຍຫຼັງເລີຍ

(ພຣະໂພທິສັດຈູລະສຸຕະໂສມຕັດວ່າ)

[໔໐໘] ທ້ອງຂອງນ້ອງນາງແກ່ແລ້ວຊັ້ນບໍ?
ຖ້າຈັ່ງຊັ້ນຂໍໃຫ້ນ້ອງນາງຈົ່ງເກີດບຸດດ້ວຍຄວາມສະວັດດີ
ສ່ວນອ້າຍຈັກຂໍລາບຸດແລະນ້ອງນາງໄປບວດ

(ພຣະໂພທິສັດຕັດປອບໂຍນພຣະນາງວ່າ)

[໔໐໙] ຢ່າຮ້ອງໄຫ້ເສົ້າໂສກໄປເລີຍ ເຈົ້າຈັນທາ
ເຈົ້າຜູ້ມີດວງເນດງາມດັ່ງດອກກັນນິກາ

ຈຶ່ງຂຶ້ນໄປສູ່ຜາສາດອັນປະເສີດພັກເທີ້ນ
ອ້າຍຈັກໄປຢ່າງຄົນໝົດຄວາມອາໄລ

(ພຣະໂອຣົດອົງໃຫຍ່ທູນຖາມວ່າ)

[໔໑໐] ສະເດັດແມ່ ໃຜເຮັດໃຫ້ສະເດັດແມ່ຊົງເສົ້າໂສກ
ເປັນຫຍັງສະເດັດແມ່ຈຶ່ງຊົງກັນແສງ
ແລະຊົງແນມເບິ່ງແຕ່ລູກຢູ່
ບັນດາພຣະຍາດທີ່ເຫັນ ໆ ກັນຢູ່
ໃຜທີ່ໜ່ອມແມ່ຂ້າບໍ່ໄດ້ ຂ້ານ້ອຍຈະຂ້າເອງ

(ພຣະເທວີຕັດວ່າ)

[໔໑໑] ລູກຮັກ ທ່ານຜູ້ໃດເຮັດໃຫ້ແມ່ເສຍໃຈ
ທ່ານຜູ້ນັ້ນເປັນຜູ້ຊະນະໃນແຜ່ນດິນ
ເຈົ້າບໍ່ສາມາດຂ້າເຂົາໄດ້ດອກ
ລູກຮັກ ພຣະບິດາຂອງເຈົ້າໄດ້ເວົ້າກັບແມ່ວ່າ
ເຮົາຈັກໄປຢ່າງຄົນໝົດຄວາມອາໄລ

(ພຣະໂອຣົດອົງໃຫຍ່ຄ່ຳຄວນຢູ່ຕັດວ່າ)

[໔໑໒] ເມື່ອກ່ອນ ຂ້ານ້ອຍນຳຊ້າງຕົກມັນ
ໄປພຣະອຸທະຍານແລະຫຼິ້ນຮົບກັນ
ບັດນີ້ ເມື່ອສະເດັດພໍ່ສຸຕະໂສມະຊົງອອກບວດແລ້ວ
ຂ້ານ້ອຍຈັກເຮັດແນວໃດນໍ

(ນ້ອງຊາຍອົງນ້ອຍຂອງພຣະໂອຣົດອົງໃຫຍ່ຕັດວ່າ)

[໔໑໓] ເມື່ອພຣະມານດາຂອງຂ້ານ້ອຍຊົງກັນແສງຢູ່
ແລະເມື່ອເຈົ້າອ້າຍບໍ່ຊົງຍິນຍອມ
ຂ້ານ້ອຍກໍຈັກຍຶດແມ່ນພຣະຫັດທັງ ໔ ຂອງສະເດັດພໍ່ໄວ້
ເມື່ອພວກຂ້ານ້ອຍບໍ່ຍິນຍອມ ສະເດັດພໍ່ຈະສະເດັດໄປບໍ່ໄດ້

(ພຣະໂພທິສັດຈູລະສຸຕະໂສມຕັດວ່າ)

[໔໑໔] ລຸກຂຶ້ນເທີ້ນເຈົ້າແມ່

ເຈົ້າຈົ່ງພາກຸມານນີ້ກັບໄປເທີ້ນ
ກຸມານນີ້ຢ່າໄດ້ເຮັດຄວາມລຳບາກໃຈໃຫ້ແກ່ເຮົາເລີຍ
ເມື່ອເຮົາກຳລັງປາຖະໜາສະຫວັນ

(ພຣະອ້າຍລ້ຽງຂາບທູນວ່າ)

[໔໑໕] ຖ້າຈັ່ງຊັ້ນ ເຮົາເພິ່ງໃຫ້ແກ້ວມະນີອັນມີແສງສະຫວ່າງນີ້
ປະໂຫຍດອັນໃດຂອງເຮົາກັບແກ້ວມະນີນີ້ນໍ
ເມື່ອພຣະຈອມນໍຣະຊົນສຸຕະໂສມຊົງອອກບວດແລ້ວ
ເຮົາຈະເຮັດແນວໃດກັບແກ້ວມະນີນໍ

(ມະຫາເສນະຄຸດຕະອຳມາດຂາບທູນວ່າ)

[໔໑໖] ພຣະຄັງນ້ອຍຂອງພຣະອົງກໍໄພບູນ
ເຮືອນຄັງຫຼວງຂອງພຣະອົງກໍບໍລິບູນ
ແລະປະຖະພີ ພຣະອົງກໍຊົງຊະນະແລ້ວ
ຂໍພຣະອົງຊົງພໍພຣະທະໄທ ຢ່າຊົງບວດເລີຍ ຂ້ານ້ອຍ

(ພຣະໂພທິສັດຈູລະສຸຕະໂສມຕັດວ່າ)

[໔໑໗] ພຣະຄັງນ້ອຍຂອງເຮົາຈະໄພບູນກໍຕາມ
ເຮືອນຄັງຫຼວງຂອງເຮົາຈະບໍລິບູນກໍຕາມ
ໃນປະຖະພີເຖິງເຮົາຊະນະແລ້ວກໍຕາມ
ແຕ່ເຮົາຈັກລະສິ່ງນັ້ນ ໆ ໄປບວດ

(ກຸລະວັດທະນະເສດຖີຂາບທູນວ່າ)

[໔໑໘] ຂໍເດຊະພຣະອົງຜູ້ສົມມຸດຕິເທບ
ແມ່ນຊັບຂອງຂ້າພຣະອົງກໍມີຢູ່ຫຼວງຫຼາຍ
ຂ້າພຣະອົງບໍ່ອາດຈະນັບໄດ້
ຂ້າພຣະອົງຂໍຖວາຍຊັບນັ້ນແມ່ນທັງໝົດແດ່ພຣະອົງ
ຂໍພຣະອົງຊົງພໍພຣະທະໄທ ຢ່າຊົງບວດເລີຍ ຂ້ານ້ອຍ

(ພຣະໂພທິສັດຈູລະສຸຕະໂສມຕັດວ່າ)

[໔໑໙] ເຮົາຮູ້ວ່າ ຊັບຂອງທ່ານມີຢູ່ຫຼາຍ

ກຸລະວັດທະນະ ແລະເຮົາທ່ານກໍບູຊາແລ້ວ
ແຕ່ເຮົາປາຖະໜາສະຫວັນ
ຍ້ອນເຫດນັ້ນ ຈຶ່ງຈັກບວດ

(ໂພທິສັດຈູລະສຸຕະໂສມຕັດຕໍ່ໄປວ່າ)

[໔໘໐] ອ້າຍເບື່ອໜ່າຍຄວາມບໍ່ຍິນດີກຳລັງຄອບງຳອ້າຍ
ນ້ອງໂສມະທັດ ຍ້ອນອັນຕະລາຍຂອງອ້າຍມີຫຼາຍ
ອ້າຍຈຶ່ງຈັກບວດວັນນີ້

(ໂສມະທັດອະນຸຊາຕັດວ່າ)

[໔໘໑] ກໍບັນພະຊາກິດນີ້ເຈົ້າອ້າຍຊົງພໍພຣະຫະໄທ
ເຈົ້າອ້າຍສຸຕະໂສມ ເຈົ້າອ້າຍຊົງບວດເທີ້ນ
ໃນວັນນີ້ ດ່ຽວນີ້ ແມ່ນຂ້ານ້ອຍກໍຈັກບວດນຳ
ເວັ້ນເຈົ້າອ້າຍສາແລ້ວ ຂ້ານ້ອຍບໍ່ອາດຈະຢູ່ໄດ້

(ພຣະໂພທິສັດຈູລະສຸຕະໂສມຕັດວ່າ)

[໔໘໒] ເຈົ້າຍັງບວດບໍ່ໄດ້
ຍ້ອນຄົນໃນເມືອງແລະໃນຊົນນະບົດຈະບໍ່ທຸງຕົ້ມກິນ
ເມື່ອມະຫາຣາດຮ້ອງໄຫ້ຄ່ຳຄວນວ່າ
ພຣະຈອມນໍຣະຊົນສຸຕະໂສມຊົງບວດແລ້ວ
ບັດນີ້ ພວກຂ້າພຣະອົງຈັກເຮັດແນວໃດນໍ

(ຕໍ່ແຕ່ນັ້ນ ພຣະໂພທິສັດຈູລະສຸຕະໂສມຕັດວ່າ)

[໔໘໓] ເຮົາເຂົ້າໃຈວ່າ ຊີວິດນີ້ຖືກຊະຣານຳໄປ
ເໝືອນກັບນ້ຳມີບໍ່ຫຼາຍໃນໝໍ້ກອງນ້ຳດ່າງ
ເມື່ອຊີວິດເປັນຂອງໜ້ອຍແນວນີ້ ຈຶ່ງບໍ່ແມ່ນເວລາທີ່ຈະຜະໝາດເລີຍ

[໔໘໔] ເຮົາເຂົ້າໃຈວ່າ ຊີວິດນີ້ຖືກຊະຣານຳໄປ
ເໝືອນກັບນ້ຳມີບໍ່ຫຼາຍໃນໝໍ້ກອງນ້ຳດ່າງ
ເມື່ອຊີວິດເປັນຂອງໜ້ອຍແນວນີ້
ເຖິງປານນັ້ນພວກຄົນພານກໍຍັງພາກັນຜະໝາດຢູ່

[໘໘໕] ພວກຄົນພານເຫຼົ່ານັ້ນຖືກເຄື່ອງຜູກຄືຕັນຫາຜູກມັດໄວ້ແລ້ວ
ຍ່ອມເຮັດນະຮົກ ກໍາເນີດສັດເດຍຣັດສານ
ເຜດວິໄສ ແລະອະສຸຣະກາຍໃຫ້ຈະເລີນ

(ມະຫາຊົນຄໍ່າຄວນກ່າວວ່າ)

[໘໘໖] ກໍກຸ່ມລະອອງທຸລີຟຸ້ງລອຍຂຶ້ນ
ໃນທີ່ບໍ່ຫ່າງໄກຈາກບຸບຜະກະຜາສາດ
ຖ້າວ່າພຣະເກສາຂອງພຣະທໍາຣາຊາ
ຜູ້ເຮືອງຍົດຂອງພວກເຮົາ ຈັກຖືກຕັດແລ້ວ

(ມະຫາຊົນບໍ່ເຫັນພຣະຣາຊາ ຈຶ່ງຫ່ວງຄໍ່າຄວນວ່າ)

[໘໘໗] ພຣະຣາຊາຊົງມີພຣະສະໜົມກໍານັນໃນຫ້ອມລ້ອມ ສະເດັດໄປ
ໃນຜາສາດໃດນໍ ນີ້ຄືຜາສາດຂອງພຣະອົງ
ດາດາດໄປດ້ວຍສຸວັນນະບຸບຜາມາໄລ

[໘໘໘] ພຣະຣາຊາຊົງມີໝູ່ພຣະຍາດຫ້ອມລ້ອມ ສະເດັດໄປ
ໃນຜາສາດໃດນໍ ນີ້ຄືຜາສາດຂອງພຣະອົງ
ດາດາດໄປດ້ວຍສຸວັນນະບຸບຜາມາໄລ

[໘໘໙] ພຣະຣາຊາຊົງມີພຣະສະໜົມກໍານັນໃນຫ້ອມລ້ອມ ສະເດັດໄປ
ໃນຜາສາດໃດນໍ ນີ້ຄືຜາສາດຂອງພຣະອົງ
ເດາດາດໄປດ້ວຍສຸວັນນະບຸບຜາມາໄລ

[໘໙໐] ພຣະຣາຊາຊົງມີໝູ່ພຣະຍາດຫ້ອມລ້ອມ ສະເດັດໄປ
ໃນຜາສາດໃດນໍ ນີ້ຄືຜາສາດຂອງພຣະອົງ
ດາດາດໄປດ້ວຍສຸວັນນະບຸບຜາມາໄລ

[໘໙໑] ພຣະຣາຊາຊົງມີພຣະສະໜົມກໍານັນໃນຫ້ອມລ້ອມ ສະເດັດໄປ
ໃນອະໂສກະວັນໃດນໍ ນີ້ຄືພູມິພາກແຫ່ງອະໂສກະວັນຂອງພຣະອົງ
ມີດອກໄມ້ບານສະພັ່ງງົດງາມ ໜ້າຣື່ນຣົມຕະຫຼອດການທັງປວງ

[໘໙໘] ພຣະຣາຊາຊົງມີໝູ່ພຣະຍາດຫ້ອມລ້ອມ ສະເດັດໄປ
ໃນອະໂສກະວັນໃດນໍ ນີ້ຄືພູມິພາກແຫ່ງອະໂສກະວັນຂອງພຣະອົງ

ມີດອກໄມ້ບານສະພັ່ງງົດງາມ ໜ້າຣື່ນຣົມຕະຫຼອດການທັງປວງ

[໘໓໓] ພຣະຣາຊາຊົງມີພຣະສະໜົມກຳນັນໃນຫ້ອມລ້ອມ ສະເດັດໄປ
ໃນພຣະອຸທະຍານໃດນໍ ນີ້ຄືພຣະຣາດຊະອຸທະຍານຂອງພຣະອົງ
ມີດອກໄມ້ບານສະພັ່ງງົດງາມຕະຫຼອດການທັງປວງ ໜ້າຣື່ນຣົມ

[໘໓໔] ພຣະຣາຊາຊົງມີໝູ່ພຣະຍາດຫ້ອມລ້ອມ ສະເດັດໄປ
ໃນພຣະອຸທະຍານໃດນໍ ນີ້ຄືພຣະຣາດຊະອຸທະຍານຂອງພຣະອົງ
ມີດອກໄມ້ບານສະພັ່ງງົດງາມ ໜ້າຣື່ນຣົມຕະຫຼອດການທັງປວງ

[໘໓໕] ພຣະຣາຊາຊົງມີພຣະສະໜົມກຳນັນໃນຫ້ອມລ້ອມ ສະເດັດໄປ
ໃນສວນກັນນິກາໃດນໍ ນີ້ຄືສວນກັນນິກາຂອງພຣະອົງ
ມີດອກໄມ້ບານສະພັ່ງງົດງາມ ໜ້າຣື່ນຣົມຕະຫຼອດການທັງປວງ

[໘໓໖] ພຣະຣາຊາຊົງມີໝູ່ພຣະຍາດຫ້ອມລ້ອມສະເດັດໄປ
ໃນສວນກັນນິກາໃດນໍ ນີ້ຄືສວນກັນນິກາຂອງພຣະອົງ
ມີດອກໄມ້ບານສະພັ່ງງົດງາມ ໜ້າຣື່ນຣົມຕະຫຼອດການທັງປວງ

[໘໓໗] ພຣະຣາຊາຊົງມີພຣະສະໜົມກຳນັນໃນຫ້ອມລ້ອມ ສະເດັດໄປ
ໃນສວນປາຕະລິວັນໃດນໍ ນີ້ຄືສວນປາຕະລິວັນຂອງພຣະອົງ
ມີດອກໄມ້ບານສະພັ່ງງົດງາມ ໜ້າຣື່ນຣົມຕະຫຼອດການທັງປວງ

[໘໓໘] ພຣະຣາຊາຊົງມີໝູ່ພຣະຍາດຫ້ອມລ້ອມສະເດັດໄປ
ໃນສວນປາຕະລິວັນໃດນໍ ນີ້ຄືສວນປາຕະລິວັນຂອງພຣະອົງ
ມີດອກໄມ້ບານສະພັ່ງງົດງາມ ໜ້າຣື່ນຣົມຕະຫຼອດການທັງປວງ

[໘໓໙] ພຣະຣາຊາຊົງມີພຣະສະໜົມກຳນັນໃນຫ້ອມລ້ອມ ສະເດັດໄປ
ໃນສວນອຳພະວັນໃດນໍ ນີ້ຄືສວນອຳພະວັນຂອງພຣະອົງ
ມີດອກໄມ້ບານສະພັ່ງງົດງາມ ໜ້າຣື່ນຣົມຕະຫຼອດການທັງປວງ

[໘໔໐] ພຣະຣາຊາຊົງມີໝູ່ພຣະຍາດຫ້ອມລ້ອມ ສະເດັດໄປ
ໃນສວນອຳພະວັນໃດນໍ ນີ້ຄືສວນອຳພະວັນຂອງພຣະອົງ
ມີດອກໄມ້ບານສະພັ່ງງົດງາມ ໜ້າຣື່ນຣົມຕະຫຼອດການທັງປວງ

[໘໔໑] ພຣະຣາຊາຊົງມີພຣະສະໜົມກຳນັນໃນຫ້ອມລ້ອມ ສະເດັດໄປ

ໃນສະໂບກຂະຣະນີໃດນໍ ນີ້ຄືສະໂບກຂະຣະນີຂອງພຣະອົງ
ເດຍລະດາດໄປດ້ວຍດອກໄມ້ນານາຊະນິດ ຄັບຄັ່ງໄປດ້ວຍຝູງນົກ

[໘໘໘] ພຣະຣາຊາຊົງມີໝູ່ພຣະຍາດຫ້ອມລ້ອມ ສະເດັດໄປ
ໃນສະໂບກຂະຣະນີໃດນໍ ນີ້ຄືສະໂບກຂະຣະນີຂອງພຣະອົງ
ເດຍລະດາດໄປດ້ວຍດອກໄມ້ນານາຊະນິດ ຄັບຄັ່ງໄປດ້ວຍຝູງນົກ

[໘໘໙] ພຣະເຈົ້າສຸຕະໂສມບໍຣົມຣາຊາຊົງສະລະຣາດຊະສົມບັດນີ້ບວດສາແລ້ວ
ພຣະອົງຊົງຜ້າກາສາວະພັດ ສະເດັດທ່ຽວໄປພຣະອົງດຽວ
ເໝືອນພະຍາຊ້າງຕົວປະເສີດ

(ພຣະໂພທິສັດຈູລະສຸຕະໂສມຕັດວ່າ)

[໘໙໐] ທ່ານທັງຫຼາຍຢ່າຫວນຣະນຶກເຖິງຄວາມຍິນດີ
ການຫຼິ້ນແລະຄວາມຣື່ນເຣີງທັງຫຼາຍໃນການກ່ອນເລີຍ
ກາມທັງຫຼາຍຢ່າຂ້າທ່ານທັງຫຼາຍໄດ້ເລີຍ
ຈິງຢູ່ ສຸທັດສະນະນະຄອນໜ້າຣື່ນຣົມຍິ່ງ

[໘໙໑] ອັນໜຶ່ງ ທ່ານທັງຫຼາຍຈົ່ງຈະເລີນເມດຕາຈິດ
ທີ່ມີອາລົມບໍ່ມີປະມານທັງກາງເວັນແລະກາງຄືນເທີ້ນ
ເມື່ອເປັນເຊັ່ນນັ້ນທ່ານທັງຫຼາຍຈະໄດ້ໄປສູ່ເທບບຸຣີ
ອັນເປັນສະຖານທີ່ຢູ່ຂອງທ່ານຜູ້ພ່ຳເພັງບຸນ ດັ່ງນີ້ແລ

**ຈູລະສຸຕະໂສມະຊາດົກທີ ໕ ຈົບ**

# ລວມຊາດົກທີ່ມີໃນນິບາດນີ້ ຄື

໑. ເຕສະກຸນະຊາດົກ
໒. ສະຣະພັງຄະຊາດົກ
໓. ອະລຳພຸສາຊາດົກ
໔. ສັງຂະປາລະຊາດົກ
໕. ຈູລະສຸຕະໂສມະຊາດົກ

**ຈັດຕາລີສະນິບາດ ຈົບ**

**ຊາດົກ ພາກ ໑ ຈົບ**